# ພຣະໄຕຣປິດົກພາສາລາວ

## ເຫຼັ້ມທີ ໔໖

# ພຣະສູດຕັນຕະປິດົກ

## ເຫຼັ້ມທີ ໑໗

## ຂຸດທະກະນິກາຍ ວິມານວັດຖຸ



ສະບັບຄົ້ນຄ້ວວັດທາດຫຼວງເໜືອ

ພຸດທະສັກກະຣາດ ໒໕໖໕

# ຄຳປາລົບ

ສືບເນື່ອງ ອາດຕະມາໄດ້ມີໂອກາດມາຊ່ອຍພຣະອາຈານອົງໜຶ່ງເຮັດພຣະໄຕປິດົກສະບັບພາສາບາລີລາວ ອອກມາເປັນເຫຼັ້ມ ຢູ່ທີ່ຫໍທຳມະສະພາ ວັດທາດຫຼວງເໜືອ ໃນປີ ພ.ສ ໒໕໕໕-໒໕໕໗ ເປັນຈຳນວນ ໔໕ ຊຸດ ໑,໕໗໕ ຫົວ ໂດຍມີຍາທ່ານໃຫຍ່ ມະຫາເວດ ມະເສໄນ ເປັນປະທ່ານເກັບກຳຄ່າໃຊ້ຈ່າຍ ຈົນສຳເລັດລົງດ້ວຍດີ ໂດຍມີແຜນການຈັກສືບຕໍ່ແປພຣະໄຕຣປິດົກສະບັບພາສາໄທ ມ.ຈ.ລ. ມາເປັນພາສາລາວ ອາດຕະມາຄຶດເຫັນວ່າເປັນມະຫາບຸນກຸສົນອັນຍິ່ງໃຫຍ່ແກ່ຕົນທີ່ຈະໄດ້ອ່ານ ແລະແປພຣະໄຕຣປິດົກອອກມາເປັນພາສາລາວທັງໝົດ ອັນເປັນໜັງສືທີ່ຮົບໂຮມຄວາມຮູ້ ຄຳສັ່ງສອນຂອງພຣະພຸດທະເຈົ້າທີ່ອາດຕະມາເຄົາຣົບ ແລະສັດທາເໜືອສິ່ງອື່ນໃດ ຈຶ່ງໄດ້ຢູ່ສືບຕໍ່ແປໂດຍລຳພັງພຽງອົງດຽວຢູ່ຫໍທຳມະສະພາບ່ອນເກົ່າ ໂດຍມີຄວາມຮູ້ບໍ່ຈົບ ມ ໒ ຄຶດຢ້ານເຮັດຜິດຫຼາຍກວ່າຖືກຢູ່ ແຕ່ອາໃສສັດທາທີ່ມີຢູ່ໃນໂຕ ຈຶ່ງສູ້ຊົນຫາຄວາມຮູ້ເອົາເອງຜ່ານໄປ ໓ ປີ ກໍໄດ້ແປພຣະວິໄນປິດົກສຳເລັດໄດ້ ໗ ເຫຼັ້ມ

ແຕ່ຕໍ່ມາໄດ້ເກີດປັນຫາຂຶ້ນໃນການແປພຣະໄຕຣປິດົກສະບັບ ມ.ຈ.ລ ຂອງຣາດສະອານາຈັກໄທມາເປັນພາສາລາວ ໃນຄັ້ງນີ້ ກ່ຽວກັບໂປຣແກຣມທີ່ໃຊ້ແປຢູ່ບໍ່ສາມາດແປງເອກະສານຂອງໂປແກຣມເກົ່າໃຫ້ມາເປັນໂປຣແກຣມໃໝ່ໄດ້ ອາດຕະມາຈຶ່ງຕັດໃຈຖິ້ມວຽກທີ່ໄດ້ແປມາ ໗ ເຫຼັ້ມນັ້ນໄປແລ້ວນັບໜຶ່ງໃໝ່ຈົນຜ່ານມາອີກ ໕ ປີ ກໍໄດ້ສຳເລັດລົງໂດຍມີພຣະອາຈານອົງນັ້ນເປັນຜູ້ແກ້ສຳນວນໃຫ້ອີກປີໜຶ່ງ

ຂໍໃຫ້ບຸກຄົນທີ່ຈະນຳເອົາໄປໃຊ້ຮັບຮູ້ໄວ້ວ່າ ເປັນການແປໂດຍສ່ວນບຸກຄົນມີພຽງແຕ່ຄູບາ ໒ ອົງເທົ່ານັ້ນ ໂດຍມີເຈດຕະນາ ກາຍ ຄັດລອກ ໂຄງສ້າງເກົ່າມາແປທັງໝົດ ທັງຫົວຂໍ້ ແລະວັກຄືກັນທັງໝົດ ໒໕ ຫົວ ຕ່າງແຕ່ສາຣະບານ ແລະການຈັດໜ້າ ແລະບໍ່ມີຄຳນຳ

ສະນັ້ນ ອາດຕະມາເອງຜູ້ແປຮູ້ດີວ່າຍັງມີຂໍ້ຜິດພາດຢູ່ຫຼາຍ ບໍ່ວ່າຄຳຜິດ ສຳນວນທີ່ໃຊ້ອ່ອນໄປ ຍ້ອນອາດຕະມາເອງການສຶກສາບໍ່ສູງ ຈຶ່ງຂໍອະໄພໄວ້ໃນທີ່ນີ້ ແລະຂໍແນະນຳໃຫ້ລະມັດລະວັງໃນການນຳໄປໃຊ້ອ້າງອີງ ຫຼື ເຮັດອອກມາເປັນເຫຼັ້ມ ກະລຸນາກວດແກ້ໃໝ່ກ່ອນທັງໝົດ

ສຸດທ້າຍນີ້ ຂໍຂອບໃຈ ລະລຶກຮູ້ບຸນຄຸນຂອງຄະນະຜູ້ແປຕົ້ນສະບັບ ມ.ຈ.ລ ພາສາໄທຍາທ່ານໃຫຍ່ ຖາວອນ ຕາພອນປະເສີດ ເຈົ້າອາທິການວັດທາດຫຼວງເໜືອ ທີ່ອຳນວຍຄວາມສະດວກໃນການເຮັດວຽກ ຄູບາ ບູນ ອົງແນະນຳໃຫ້ໃຊ້ໂປຣແກຣມໃໝ່ເຮັດໃຫ້ແປໄດ້ໄວຂຶ້ນຫຼາຍ ແລະ ພຣະອາຈານຜູ້ຊີ້ນຳເຂົ້າມາເຮັດວຽກແປພຣະໄຕຣປິດົກໃນຄັ້ງນີ້ອີກອົງໜຶ່ງ ເພິ່ນບໍ່ປະສົງອອກນາມຄືອາດຕະມາ ຂໍພຣະສັດທຳຂອງອົງສົມເດັດ ພຣະສຳມາສຳພຸດທະເຈົ້າຈົ່ງເກື້ອກູນແດ່ ເພື່ອນ ເກີດ ແກ່ ເຈັບ ຕາຍ ທຸກຄົນ ທຸກຊັ້ນ ທຸກວັນນະ ທຸກພົບ ທຸກພູມ ເທີ້ນ.

# ສາຣະບານ

# ພຣະໄຕຣປິດົກ

## ເຫຼັ້ມທີ ໔໘

# ພຣະສູດຕັນຕະປິດົກ

## ເຫຼັ້ມທີ ໑໙

## ຂຸດທະກະນິກາຍ ວິມານວັດຖຸ

**ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສໍາມາສໍາພຸດທະເຈົ້າ ພຣະອົງນັ້ນ**

# ໑. ອິດຖີວິມານ

## ໑. ປີຖະວັກ

### ໝວດວ່າດ້ວຍຕັ່ງ

## ໑. ປະຖົມປີຖະວິມານ

### ວ່າດ້ວຍວິມານຕັ່ງ ເລື້ອງທີ ໑

(ພຣະມະຫາໂມກຄັນລານະເຖຣະຖາມວ່າ)

[໑] ເທບທິດາຜູ້ປະດັບອົງ ຊົງມາໄລ ຊົງພູສາສວຍງາມ
ວິມານຕັ່ງຄໍາຂອງທ່ານຊ່າງໂອ່ອ່າ
ລ່ອງລອຍໄປໃນບ່ອນຕ່າງ ໆ ໄດ້ວ່ອງໄວສົມໃຈປາຖະໜາ
ທ່ານເປ່ງຣັດສະໝີສະຫວ່າງສະໄຫວ ດັ່ງສາຍຟ້າແມບອອກຈາກກີບກ້ອນເຝື້ອ

[໔] ຍ້ອນບຸນອັນໃດຜິວພັນທ່ານຈຶ່ງງາມແນວນີ້
ຜົນອັນເພິ່ງປາຖະໜາຈຶ່ງສໍາເລັດແກ່ທ່ານໃນວິມານນີ້
ແລະໂພຄະ ໌ ທັງມວນລ້ວນໜ້າພໍໃຈຈຶ່ງເກີດແກ່ທ່ານ

[໓] ເທບທິດາຜູ້ມີອານຸພາບຫຼາຍ ອາດຕະມາຂໍຖາມວ່າ
ເມື່ອທ່ານເກີດເປັນມະນຸດໄດ້ເຮັດບຸນອັນໃດໄວ້
ຍ້ອນບຸນອັນໃດທ່ານຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

[໔] ເທບທິດານັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ
ຈຶ່ງຕອບບັນຫາຜົນກຳຕາມທີ່ພຣະເຖຣະຖາມວ່າ

[໕] ເມື່ອຂ້ານ້ອຍເກີດເປັນມະນຸດຢູ່ໃນໝູ່ມະນຸດ
ໄດ້ຖວາຍຕັ່ງ[໑] ແດ່ບັນດາພິກຂຸຜູ້ເພິ່ງມາເຖິງ
ໄດ້ຂາບໄຫວ້ ປະຄອງອັນຊະລີ
ແລະຖວາຍທານຕາມກຳລັງຊັບ

[໖] ຍ້ອນບຸນນັ້ນຜິວພັນຂ້ານ້ອຍຈຶ່ງງາມແນວນີ້
ຜົນອັນເພິ່ງປາຖະໜາຈຶ່ງສຳເລັດແກ່ຂ້ານ້ອຍໃນວິມານນີ້
ແລະໂພຄະທັງມວນລ້ວນໜ້າພໍໃຈຈຶ່ງເກີດຂຶ້ນແກ່ຂ້ານ້ອຍ

[໗] ຂ້າແດ່ພິກຂຸຜູ້ມີອານຸພາບຫຼາຍ ຂ້ານ້ອຍຂໍຂາບຮຽນວ່າ
ຍ້ອນບຸນທີ່ໄດ້ເຮັດໄວ້ສະໄໝເມື່ອເກີດເປັນມະນຸດ
ຂ້ານ້ອຍຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

**ປະຖົມປີຖະວິມານທີ ໑ ຈົບ**

## ໘. ທຸຕິຍະປີຖະວິມານ

## ວ່າດ້ວຍວິມານຕັ່ງ ເລື້ອງທີ ໘

(ພຣະມະຫາໂມກຄັນລານະເຖຣະຖາມວ່າ)

[໘] ເທບທິດາຜູ້ປະດັບອົງ ຊົງມາໄລ ຊົງພູສາສວຍງາມ
ວິມານຕັ່ງແກ້ວໄພທູນຂອງທ່ານຊ່າງໂອ່ອ່າ
ລ່ອງລອຍໄປໃນບ່ອນຕ່າງ ໆ ໄດ້ວ່ອງໄວສົມໃຈປາຖະໜາ
ທ່ານເປ່ງຣັດສະໝີສະຫວ່າງສະໄຫວດັ່ງສາຍຟ້າແມບອອກຈາກກີບກ້ອນເຝື້ອ

[๙] ຍ້ອນບຸນອັນໃດຜິວພັນທ່ານຈຶ່ງງາມແນວນີ້
ຜົນອັນເພິ່ງປາຖະໜາຈຶ່ງສໍາເລັດແກ່ທ່ານໃນວິມານນີ້
ແລະໂພຄະທັງມວນລ້ວນໜ້າພໍໃຈຈຶ່ງເກີດຂຶ້ນແກ່ທ່ານ

[໑໐] ເທບທິດາຜູ້ມີອານຸພາບຫຼາຍ ອາດຕະມາຂໍຖາມວ່າ
ເມື່ອທ່ານເກີດເປັນມະນຸດໄດ້ເຮັດບຸນອັນໃດໄວ້
ຍ້ອນບຸນອັນໃດທ່ານຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

[໑໑] ເທບທິດານັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ
ຈຶ່ງຕອບບັນຫາຜົນກໍາຕາມທີ່ພຣະເຖຣະຖາມວ່າ

[໑໒] ເມື່ອຂ້ານ້ອຍເກີດເປັນມະນຸດຢູ່ໃນໝູ່ມະນຸດ
ໄດ້ຖວາຍຕັ່ງແດ່ບັນດາພິກຂຸຜູ້ເພິ່ງມາເຖິງ ໄດ້ຂາບໄຫວ້
ປະຄອງອັນຊະລີແລະຖວາຍທານຕາມກໍາລັງຊັບ

[໑໓] ຍ້ອນບຸນນັ້ນຜິວພັນຂ້ານ້ອຍຈຶ່ງງາມແນວນີ້
ຜົນອັນເພິ່ງປາຖະໜາຈຶ່ງສໍາເລັດແກ່ຂ້ານ້ອຍໃນວິມານນີ້
ແລະໂພຄະທັງມວນລ້ວນໜ້າພໍໃຈຈຶ່ງເກີດຂຶ້ນແກ່ຂ້ານ້ອຍ

[໑໔] ຂ້າແດ່ພິກຂຸຜູ້ມີອານຸພາບຫຼາຍ ຂ້ານ້ອຍຂໍຂາບຮຽນວ່າ
ຍ້ອນບຸນທີ່ໄດ້ເຮັດໄວ້ສະໄໝເມື່ອເກີດເປັນມະນຸດ
ຂ້ານ້ອຍຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

**ທຸຕິຍະປີຖະວິມານທີ ໒ ຈົບ**

## ໓. ຕະຕິຍະປີຖະວິມານ

## ວ່າດ້ວຍວິມານຕັ່ງ ເລື່ອງທີ ໓

(ພຣະມະຫາໂມກຄັນລານະເຖຣະຖາມວ່າ)

[໑໕] ເທບທິດາຜູ້ປະດັບອົງ ຊົງມາໄລ ຊົງພູສາສວຍງາມ
ວິມານຕັ່ງຄໍາຂອງທ່ານຊ່າງໂອ່ອ່າ

ລ່ອງລອຍໄປໃນບ່ອນຕ່າງ ໆ ໄດ້ວ່ອງໄວສົມໃຈປາຖະໜາ
ທ່ານເປ່ງຣັດສະໝີສະຫວ່າງສະໄຫວ ດັ່ງສາຍຟ້າແມບອອກຈາກກີບກ້ອນເຜື້ອ

[໑໖] ຍ້ອນບຸນອັນໃດຜິວພັນທ່ານຈຶ່ງງາມແນວນີ້
ຜົນອັນເພິ່ງປາຖະໜາຈຶ່ງສຳເລັດແກ່ທ່ານໃນວິມານນີ້
ແລະໂພຄະທັງມວນລ້ວນໜ້າພໍໃຈຈຶ່ງເກີດຂຶ້ນແກ່ທ່ານ

[໑໗] ເທບທິດາຜູ້ມີອານຸພາບຫຼາຍ ອາດຕະມາຂໍຖາມວ່າ
ເມື່ອທ່ານເກີດເປັນມະນຸດໄດ້ເຮັດບຸນອັນໃດໄວ້
ຍ້ອນບຸນອັນໃດທ່ານຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

[໑໘] ເທບທິດານັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ
ຈຶ່ງຕອບບັນຫາຜົນກຳຕາມທີ່ພຣະເຖຣະຖາມວ່າ

[໑໙] ຂ້ານ້ອຍມີອານຸພາບຮຸ່ງເຮືອງແນວນີ້
ຍ້ອນຜົນກຳກອງນ້ອຍຂອງຂ້ານ້ອຍ
ຊາດກ່ອນຂ້ານ້ອຍເກີດເປັນມະນຸດ
ຢູ່ໃນໝູ່ມະນຸດໃນມະນຸດສາໂລກ

[໔໐] ໄດ້ເຫັນພິກຂຸຜູ້ປາສະຈາກກິເລດເໝືອນທຸລີ
ມີໃຈຜ່ອງໃສບໍ່ມົວໝອງ
ເຫຼື້ອມໃສແລ້ວໄດ້ຖວາຍຕັ່ງແດ່ທ່ານ
ດ້ວຍມືທັງສອງຂອງຕົນ

[໔໑] ຍ້ອນບຸນນັ້ນຜິວພັນ ຂ້ານ້ອຍຈຶ່ງງາມແນວນີ້
ຜົນອັນເພິ່ງປາຖະໜາຈຶ່ງສຳເລັດແກ່ຂ້ານ້ອຍໃນວິມານນີ້
ແລະໂພຄະທັງມວນລ້ວນໜ້າພໍໃຈຈຶ່ງເກີດຂຶ້ນແກ່ຂ້ານ້ອຍ

[໔໔] ຂ້າແດ່ພິກຂຸຜູ້ມີອານຸພາບຫຼາຍຂ້ານ້ອຍຂໍຂາບຮຽນວ່າ
ຍ້ອນບຸນທີ່ໄດ້ເຮັດໄວ້ສະໄໝເມື່ອເກີດເປັນມະນຸດ
ຂ້ານ້ອຍຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

**ຕະຕິຍະປີຖະວິມານທີ ໓ ຈົບ**

# ໔. ຈະຕຸດຖະປີຖະວິມານ

## ວ່າດ້ວຍວິມານຕັ່ງ ເລື້ອງທີ ໔

(ພຣະມະຫາໂມກຄັນລານະເຖຣະຖາມວ່າ)

[໔໓] ເທບທິດາຜູ້ປະດັບອົງ ຊົງມາໄລ ຊົງພູສາສວຍງາມ
ວິມານຕັ່ງແກ້ວໄພທູນຂອງທ່ານຊ່າງໂອ່ອ່າ
ລ່ອງລອຍໄປໃນບ່ອນຕ່າງ ໆ ໄດ້ວ່ອງໄວສົມໃຈປາຖະໜາ
ທ່ານເປ່ງຣັດສະໝີສະຫວ່າງສະໄຫວ
ດັ່ງສາຍຟ້າແມບອອກຈາກກີບກ້ອນເຝືອ

[໔໔] ຍ້ອນບຸນອັນໃດຜິວພັນທ່ານຈຶ່ງງາມແນວນີ້
ຜົນອັນເພິ່ງປາຖະໜາຈຶ່ງສຳເລັດແກ່ທ່ານໃນວິມານນີ້
ແລະໂພຄະທັງມວນລ້ວນໜ້າພໍໃຈຈຶ່ງເກີດຂຶ້ນແກ່ທ່ານ

[໔໕] ເທບທິດາຜູ້ມີອານຸພາບຫຼາຍ ອາດຕະມາຂໍຖາມວ່າ
ເມື່ອທ່ານເກີດເປັນມະນຸດໄດ້ເຮັດບຸນອັນໃດໄວ້
ຍ້ອນບຸນອັນໃດທ່ານຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

[໔໖] ເທບທິດານັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ
ຈຶ່ງຕອບບັນຫາຜົນກຳຕາມທີ່ພຣະເຖຣະຖາມວ່າ

[໔໗] ຂ້ານ້ອຍມີອານຸພາບຮຸ່ງເຮືອງແນວນີ້
ຍ້ອນຜົນກຳກອງນ້ອຍຂອງຂ້ານ້ອຍ
ຊາດກ່ອນ ຂ້ານ້ອຍເກີດເປັນມະນຸດ
ຢູ່ໃນໝູ່ມະນຸດໃນມະນຸດສາໂລກ

[໔໘] ໄດ້ເຫັນພິກຂຸຜູ້ປາສະຈາກກິເລດເໝືອນທຸລີ
ມີໃຈຜ່ອງໃສບໍ່ມົວໝອງ ເຫຼື້ອມໃສແລ້ວ
ໄດ້ຖວາຍຕັ່ງແດ່ທ່ານດ້ວຍມືທັງສອງຂອງຕົນ

[໔໙] ຍ້ອນບຸນນັ້ນຜິວພັນຂ້ານ້ອຍຈຶ່ງງາມແນວນີ້
ຜົນອັນເພິ່ງປາຖະໜາຈຶ່ງສຳເລັດແກ່ຂ້ານ້ອຍໃນວິມານນີ້

ແລະໂພຄະທັງມວນລ້ວນໜ້າພໍໃຈຈຶ່ງເກີດຂຶ້ນແກ່ຂ້ານ້ອຍ

[໓໐] ຂ້າແດ່ພິກຂຸຜູ້ມີອານຸພາບຫຼາຍ ຂ້ານ້ອຍຂໍຂາບຮຽນວ່າ
ຍ້ອນບຸນທີ່ໄດ້ເຮັດໄວ້ສະໄໝເມື່ອເກີດເປັນມະນຸດ
ຂ້ານ້ອຍຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

**ຈະຕຸດຖະປີຖະວິມານທີ ໔ ຈົບ**

# ໕. ກຸນຊະຣະວິມານ

## ວ່າດ້ວຍວິມານທີ່ມີຊ້າງເປັນພາຫະນະ

(ພຣະມະຫາໂມກຄັນລານະເຖຣະຖາມວ່າ)

[໓໑] ເທບທິດາຜູ້ມີດວງຕາງົດງາມຄ້າຍກີບປະທຸມ
ຊ້າງພາຫະນະອັນປະເສີດຂອງທ່ານ
ປະດັບປະດາດ້ວຍແກ້ວນານາປະການ
ໜ້າພໍໃຈ ມີພະລັງ ແຄ່ວຄ່ອງວ່ອງໄວ
ທ່ອງທ່ຽວໄປໃນອາກາດໄດ້

[໓໒] ກະພອງມີສີຄ້າຍສີດອກປະທຸມ
ປະດັບດ້ວຍພວງດອກບົວຫຼວງແລະພວງດອກບົວທີບ
ງາມຮຸ່ງເຮືອງ ຕາມໂຕໂຮຍຢາຍດ້ວຍເກສອນປະທຸມ
ປະດັບດ້ວຍພວງປະທຸມຄໍາທີ່ສະງ່າງາມ

[໓໓] ພະຍາຊ້າງກ້າວຍ່າງໄປໄດ້ຢ່າງຮາບຮຽບ
ບໍ່ສັ່ນສະເທືອນຕະຫຼອດທາງ
ທີ່ເດຍຣະດາດດ້ວຍດອກບົວຫຼວງຄໍາຂະໜາດໃຫຍ່
ມີກີບປະທຸມປະດັບປະດາຢູ່

[໓໔] ເມື່ອພະຍາຊ້າງກ້າວຍ່າງໄປ
ກະດິງຄໍາກໍດັງປະສານສຽງໜ້າອອນຊອນ
ກັງວານມ່ວນຈັບໃຈ
ຟັງຄ້າຍກັບສຽງດົນຕີເຄື່ອງຫ້າ°

[໓໕] ທ່ານຊົງພູສາສະອາດສະອ້ານ ປະດັບອົງຢູ່ເທິງຄໍຊ້າງ
ມີຜິວພັນງາມລ້ຳໝູ່ນາງອັບປະສອນຈຳນວນຫຼາຍ

[໓໖] ນີ້ເປັນຜົນຂອງທານ ສິນ ຫຼືການຂາບໄຫວ້ຂອງທ່ານ
ອາດຕະມາຖາມທ່ານແລ້ວ ໂຜດບອກຜົນກຳນັ້ນເທີ້ນ
[໓໗] ເທບທິດານັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ
ຈຶ່ງຕອບບັນຫາຜົນກຳຕາມທີ່ພຣະເຖຣະຖາມວ່າ

[໓໘] ຂ້ານ້ອຍໄດ້ເຫັນພຣະເຖຣະຜູ້ສົມບູນດ້ວຍຄຸນ [໖]
ຜູ້ໄດ້ຊານ ຍິນດີໃນຊານ ສະງົບ
ຈຶ່ງໄດ້ຖວາຍອາສະນະທີ່ປູດ້ວຍຜ້າ ໂຮຍຢາຍດອກໄມ້ໄວ້

[໓໙] ຍັງມີດອກບົວຫຼວງເຫຼືອຢູ່ອີກເຄິ່ງໜຶ່ງ
ຂ້ານ້ອຍເຫຼື້ອມໃສແລ້ວຈຶ່ງໂຮຍກີບປະທຸມ
ຮອບ ໆ ອາສະນະດ້ວຍມືຂອງຕົນ

[໔໐] ຜົນແຫ່ງກຸສົນກຳຂອງຂ້ານ້ອຍນັ້ນເປັນແນວນີ້
ຂ້ານ້ອຍຈຶ່ງເປັນທີ່ສັກກາຣະ ເຄົາລົບ ນອບນ້ອມ ຂອງມວນເທບ

[໔໑] ບຸກຄົນຜູ້ເຫຼື້ອມໃສ ຖວາຍອາສະນະ
ແດ່ຜູ້ມີປົກກະຕິປະພຶດພົມມະຈັນ
ລຸດພົ້ນໂດຍຖືກຕ້ອງ ສະງົບແລ້ວ
ເພິ່ງບັນເທີງໃຈເຊັ່ນດຽວກັບຂ້ານ້ອຍ

[໔໒] ຍ້ອນເຫດນັ້ນແລ ທ່ານຜູ້ມຸ້ງປະໂຫຍດຕົນ
ຫວັງຜົນຫຼາຍ ຄວນຖວາຍອາສະນະ
ແດ່ທ່ານຜູ້ຄອງຮ່າງຊາດສຸດທ້າຍ[໗]

**ກຸນຊະຣະວິມານທີ ໕ ຈົບ**

## ໖. ປະຖົມນາວາວິມານ

## ວ່າດ້ວຍວິມານທີ່ມີເຮືອເປັນພາຫະນະ ເລື້ອງທີ ໑

(ພຣະມະຫາໂມກຄັນລານະເຖຣະຖາມວ່າ)

[໔໓]        ເທບນາຣີ ທ່ານຂຶ້ນຢູ່ເທິງເຮືອຫຼັງຄາຄຳ
ລ່ອງລອຍເຂົ້າສູ່ສະໂບກຂະຣະນີ ເດັດດອກບົວຫຼວງຢູ່

[໔໔]        ຍ້ອນບຸນອັນໃດຜິວພັນທ່ານຈຶ່ງງາມແນວນີ້
ຜົນອັນເພິ່ງປາຖະໜາຈຶ່ງສຳເລັດແກ່ທ່ານໃນວິມານນີ້
ແລະໂພຄະທັງມວນລ້ວນໜ້າພໍໃຈຈຶ່ງເກີດຂຶ້ນແກ່ທ່ານ

[໔໕]        ເທບທິດາຜູ້ມີອານຸພາບຫຼາຍ ອາດຕະມາຂໍຖາມວ່າ
ເມື່ອທ່ານເກີດເປັນມະນຸດໄດ້ເຮັດບຸນອັນໃດໄວ້
ຍ້ອນບຸນອັນໃດທ່ານຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

[໔໖]        ເທບທິດານັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ
ຈຶ່ງຕອບບັນຫາຜົນກຳຕາມທີ່ພຣະເຖຣະຖາມວ່າ

[໔໗]        ຊາດກ່ອນ ຂ້ານ້ອຍເກີດເປັນມະນຸດ
ຢູ່ໃນໝູ່ມະນຸດໃນມະນຸດສາໂລກ
ໄດ້ເຫັນພິກຂຸຫຼາຍອົງຜູ້ອິດເມື່ອຍຫິວນ້ຳ
ຈຶ່ງຕັ້ງໃຈຖວາຍນ້ຳໃຫ້ທ່ານດື່ມ

[໔໘]        ຜູ້ໃດແລຕັ້ງໃຈຖວາຍນ້ຳໃຫ້ພິກຂຸຫຼາຍອົງ
ຜູ້ອິດເມື່ອຍຫິວນ້ຳໄດ້ດື່ມ
ແມ່ນ້ຳຫຼາຍສາຍມີກະແສນ້ຳໃສເຢັນ
ຫຼາຍໄປດ້ວຍສວນໄມ້ດອກ ມີບົວຂາວຢູ່ຫຼວງຫຼາຍ ຍ່ອມເກີດແກ່ຜູ້ນັ້ນ

[໔໙]        ວິມານນັ້ນມີແມ່ນ້ຳຫຼາຍສາຍໄຫຼອ້ອມຮອບຢູ່ປະຈຳ
ສາຍນ້ຳມີຊາຍມູນ ມີກະແສນ້ຳໃສເຢັນ
ມີໝູ່ໄມ້ໝາກມ່ວງ ໄມ້ສາລະ ໄມ້ໝາກຫອມ ໄມ້ຫວ້າ
ໄມ້ຣາຊະພຶກແລະໝູ່ໄມ້ແຄຝອຍ ແຕກດອກອອກຜົນສະພັ່ງ

[໕໐]        ວິມານອັນເລີເລີດມີພູມິພາກເຊັ່ນນັ້ນ
ເປັນສ່ວນປະກອບງົດງາມເຫຼືອເກີນ
ນີ້ເປັນຜົນຂອງກຳນັ້ນນັ້ນເອງ
ຜູ້ເຮັດບຸນໄວ້ແລ້ວຍ່ອມໄດ້ວິມານແນວນີ້

[໕໑]　ຍ້ອນບຸນນັ້ນຜິວພັນຂ້ານ້ອຍຈຶ່ງງາມແບບນີ້
ຜົນອັນເພິ່ງປາຖະໜາຈຶ່ງສຳເລັດແກ່ຂ້ານ້ອຍໃນວິມານນີ້
ແລະໂພຄະທັງມວນລ້ວນໜ້າພໍໃຈຈຶ່ງເກີດຂຶ້ນແກ່ຂ້ານ້ອຍ

[໕໒]　ຂ້າແດ່ພິກຂຸຜູ້ມີອານຸພາບຫຼາຍ ຂ້ານ້ອຍຂໍຂາບຮຽນວ່າ
ຍ້ອນບຸນທີ່ໄດ້ເຮັດໄວ້ສະໄໝເມື່ອເກີດເປັນມະນຸດ
ຂ້ານ້ອຍຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແບບນີ້

**ປະຖົມນາວາວິມານທີ ໖ ຈົບ**

## ໗. ທຸຕິຍະນາວາວິມານ

## ວ່າດ້ວຍວິມານທີ່ມີເຮືອເປັນພາຫະນະ ເລື່ອງທີ ໒

(ພຣະມະຫາໂມກຄັນລານະເຖຣະຖາມວ່າ)

[໕໓]　ເທບນາຣີ ທ່ານຂຶ້ນຢູ່ເທິງເຮືອຫຼັງຄາຄຳ
ລ່ອງລອຍເຂົ້າສູ່ສະໂບກຂະຣະນີ ເດັດດອກບົວຫຼວງຢູ່
[໕໔]　ຍ້ອນບຸນອັນໃດຜິວພັນທ່ານຈຶ່ງງາມແບບນີ້
ຜົນອັນເພິ່ງປາຖະໜາຈຶ່ງສຳເລັດແກ່ທ່ານໃນວິມານນີ້
ແລະໂພຄະທັງມວນລ້ວນໜ້າພໍໃຈຈຶ່ງເກີດຂຶ້ນແກ່ທ່ານ

[໕໕]　ເທບທິດາຜູ້ມີອານຸພາບຫຼາຍ ອາດຕະມາຂໍຖາມວ່າ
ເມື່ອທ່ານເກີດເປັນມະນຸດໄດ້ເຮັດບຸນອັນໃດໄວ້
ຍ້ອນບຸນອັນໃດທ່ານຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແບບນີ້

[໕໖]　ເທບທິດານັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ
ຈຶ່ງຕອບບັນຫາຜົນກຳຕາມທີ່ພຣະເຖຣະຖາມວ່າ

[໕໗]　ຊາດກ່ອນ ຂ້ານ້ອຍເກີດເປັນມະນຸດ
ຢູ່ໃນໝູ່ມະນຸດໃນມະນຸດສາໂລກ
ໄດ້ເຫັນພິກຂຸຜູ້ອິດເມື່ອຍຫິວນ້ຳ
ຈຶ່ງຕັ້ງໃຈຖວາຍນ້ຳໃຫ້ທ່ານດື່ມ

[໔໗] ຜູ້ໃດແລຕັ້ງໃຈຖວາຍນໍ້າ
ໃຫ້ພິກຂຸຜູ້ອິດເມື່ອຍຫິວນໍ້າໄດ້ດື່ມ
ແມ່ນໍ້າຫຼາຍສາຍມີກະແສນໍ້າໃສເຢັນ ຫຼາຍໄປດ້ວຍສວນໄມ້ດອກ
ມີບົວຂາວຢູ່ຫຼວງຫຼາຍຍ່ອມເກີດແກ່ຜູ້ນັ້ນ

[໔໙] ວິມານນັ້ນ ມີນໍ້າຫຼາຍສາຍໄຫຼອ້ອມຮອບຢູ່ປະຈຳ
ສາຍນໍ້າມີຊາຍມູນ ມີກະແສນໍ້າໃສເຢັນ
ມີໝູ່ໄມ້ໝາກມ່ວງ ໄມ້ສາລະ ໄມ້ໝາກຫອມ ໄມ້ຫວ້າ
ໄມ້ຣາຊະພຶກແລະໝູ່ໄມ້ແຄຝອຍ ແຕກດອກອອກຜົນສະພັ່ງ

[໕໐] ວິມານອັນເລີເລີດມີພູມີພາກເຊັ່ນນັ້ນ
ເປັນສ່ວນປະກອບງົດງາມເຫຼືອເກີນ
ນີ້ເປັນຜົນຂອງກຳນັ້ນນັ້ນເອງ
ຜູ້ເຮັດບຸນໄວ້ແລ້ວຍ່ອມໄດ້ວິມານແນວນີ້

[໕໑] ຍ້ອນບຸນນັ້ນຜິວພັນຂ້ານ້ອຍຈຶ່ງງາມແນວນີ້
ຜົນອັນເພິ່ງປາຖະໜາຈຶ່ງສຳເລັດແກ່ຂ້ານ້ອຍໃນວິມານນີ້
ແລະໂພຄະທັງມວນລ້ວນໜ້າພໍໃຈຈຶ່ງເກີດຂຶ້ນແກ່ຂ້ານ້ອຍ

[໕໒] ຂ້າແດ່ພິກຂຸຜູ້ມີອານຸພາບຫຼາຍ ຂ້ານ້ອຍຂໍຂາບຮຽນວ່າ
ຍ້ອນບຸນທີ່ໄດ້ເຮັດໄວ້ສະໄໝເມື່ອເກີດເປັນມະນຸດ
ຂ້ານ້ອຍຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

**ທຸຕິຍະນາວາວິມານທີ ໆ ຈົບ**

## ໗. ຕະຕິຍະນາວາວິມານ

## ວ່າດ້ວຍວິມານທີ່ມີເຮືອເປັນພາຫະນະ ເລື້ອງທີ ໓

(ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ)

[໕໓] ເທບນາຣີ ທ່ານຂຶ້ນຢູ່ເທິງເຮືອຫຼັງຄາຄຳ
ລ່ອງລອຍເຂົ້າສູ່ສະໂບກຂະຣະນີ ເດັດດອກບົວຫຼວງຢູ່

[໕໔] ວິມານເຮືອນຍອດຂອງທ່ານ
ຈັດແບ່ງໄວ້ແຕ່ລະສ່ວນຢ່າງເໝາະສົມ
ສ່ອງສະຫວ່າງຮຸ່ງເຮືອງຮອບທັງ ໔ ທິດ

[໕໕] ຍ້ອນບຸນອັນໃດຜົວພັນທ່ານຈຶ່ງງາມແນວນີ້
ຜົນອັນເພິ່ງປາຖະໜາຈຶ່ງສຳເລັດແກ່ທ່ານໃນວິມານນີ້
ແລະໂພຄະທັງມວນລ້ວນໜ້າພໍໃຈຈຶ່ງເກີດຂຶ້ນແກ່ທ່ານ

[໕໖] ເທບທິດາຜູ້ມີອານຸພາບຫຼາຍ ຕະຖາຄົດຂໍຖາມວ່າ
ເມື່ອທ່ານເກີດເປັນມະນຸດໄດ້ເຮັດບຸນອັນໃດໄວ້
ຍ້ອນບຸນອັນໃດທ່ານຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

[໕໗] ເທບທິດານັ້ນດີໃຈທີ່ພຣະສຳມາສຳພຸດທະເຈົ້າຕັດຖາມ
ຈຶ່ງທູນຕອບບັນຫາຜົນກຳ
ຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ

[໕໘] ຊາດກ່ອນຂ້າພຣະອົງເກີດເປັນມະນຸດ
ຢູ່ໃນໝູ່ມະນຸດໃນມະນຸດສາໂລກ
ໄດ້ເຫັນພິກຂຸຫຼາຍອົງຜູ້ອິດເມື່ອຍຫິວນ້ຳ
ຈຶ່ງຕັ້ງໃຈຖວາຍນ້ຳໃຫ້ທ່ານດື່ມ

[໕໙] ຜູ້ໃດແລ ຕັ້ງໃຈຖວາຍນ້ຳໃຫ້ພິກຂຸຫຼາຍອົງ
ຜູ້ອິດເມື່ອຍຫິວນ້ຳໄດ້ດື່ມ
ແມ່ນ້ຳຫຼາຍສາຍມີກະແສນ້ຳໃສເຢັນ ຫຼາຍໄປດ້ວຍສວນໄມ້ດອກ
ມີບົວຂາວຢູ່ຫຼວງຫຼາຍຍ່ອມເກີດແກ່ຜູ້ນັ້ນ

[໖໐] ວິມານນັ້ນມີແມ່ນ້ຳຫຼາຍສາຍໄຫຼອ້ອມຮອບຢູ່ປະຈຳ
ສາຍນ້ຳມີຊາຍມູນ ມີກະແສນ້ຳໃສເຢັນ
ມີໝູ່ໄມ້ໝາກມ່ວງ ໄມ້ສາລະ ໄມ້ໝາກຫອມ ໄມ້ຫວ້າ
ໄມ້ຣາຊະພຶກແລະໝູ່ໄມ້ແຄຝອຍ ແຕກດອກອອກຜົນສະພັ່ງ

[໖໑] ວິມານອັນເລີເລີດ ມີພູມິພາກເຊັ່ນນັ້ນ
ເປັນສ່ວນປະກອບງົດງາມເຫຼືອເກີນ

ນີ້ເປັນຜົນຂອງກຳນັ້ນນັ້ນເອງ
ຜູ້ເຮັດບຸນໄວ້ແລ້ວຍ່ອມໄດ້ວິມານແນວນີ້

[໗໔] ວິມານທີ່ຢູ່ຂອງຂ້າພຣະອົງມີເຮືອນຍອດ
ຈັດແບ່ງໄວ້ແຕ່ລະສ່ວນຢ່າງເໝາະສົມ
ສ່ອງສະຫວ່າງຮຸ່ງເຮືອງຮອບທັງ ໔ ທິດ
[໗໕] ຍ້ອນບຸນນັ້ນຜິວພັນຂ້າພຣະອົງຈຶ່ງງາມແນວນີ້
ຜົນອັນເພິ່ງປາຖະໜາຈຶ່ງສຳເລັດແກ່ຂ້າພຣະອົງໃນວິມານນີ້
ແລະໂພຄະທັງມວນລ້ວນໜ້າພໍໃຈຈຶ່ງເກີດຂຶ້ນແກ່ຂ້າພຣະອົງ

[໗໔] ຂ້າແດ່ພຣະພຸດທະອົງຜູ້ຊົງອານຸພາບຫຼາຍ ຂ້າພຣະອົງຂໍຂາບທູນວ່າ
ຍ້ອນບຸນທີ່ໄດ້ເຮັດໄວ້ສະໄໝເມື່ອເກີດເປັນມະນຸດ
ຂ້າພຣະອົງຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້
ນີ້ເປັນຜົນຂອງກຳທີ່ພຣະພຸດທະອົງຊົງສະເຫວີຍນ້ຳ
ທີ່ຂ້ານ້ອຍຕັ້ງໃຈຖວາຍນັ້ນ

**ຕະຕິຍະນາວາວິມານທີ ໗ ຈົບ**

## ໘. ປະທີປະວິມານ

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ຍິງຜູ້ຖວາຍປະທີບ

(ພຣະມະຫາໂມກຄັນລານະເຖຣະຖາມວ່າ)

[໗໔] ເທບທິດາ ທ່ານມີຜິວພັນງາມຍິ່ງ
ເປ່ງຣັດສະໝີສະຫວ່າງສະໄຫວໄປທົ່ວທຸກທິດສະຖິດຢູ່ ຄືດາວປະກາຍພຶກ[១]

[໗໙] ຍ້ອນບຸນອັນໃດຜິວພັນທ່ານຈຶ່ງງາມແນວນີ້
ຜົນອັນເພິ່ງປາຖະໜາຈຶ່ງສຳເລັດແກ່ທ່ານໃນວິມານນີ້
ແລະໂພຄະທັງມວນລ້ວນໜ້າພໍໃຈຈຶ່ງເກີດຂຶ້ນແກ່ທ່ານ

[໘໐] ເທບທິດາ ຍ້ອນບຸນອັນໃດທ່ານຈຶ່ງມີຣັດສະໝີຜ່ອງໃສ
ໄພໂຣດລ້ຳເຫຼົ່າເທບທັງມວນ
ຍ້ອນບຸນອັນໃດທ່ານຈຶ່ງມີອະໄວຍະວະທຸກສ່ວນສ່ອງສະຫວ່າງໄປທົ່ວທຸກທິດ

[໗໗] ເທບທິດາຜູ້ມີອານຸພາບຫຼາຍ ອາດຕະມາຂໍຖາມວ່າ
ເມື່ອທ່ານເກີດເປັນມະນຸດໄດ້ເຮັດບຸນອັນໃດໄວ້
ຍ້ອນບຸນອັນໃດທ່ານຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

[໗໘] ເທບທິດານັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ
ຈຶ່ງຕອບບັນຫາຜົນກຳຕາມທີ່ພຣະເຖຣະຖາມວ່າ

[໘໐] ຊາດກ່ອນຂ້ານ້ອຍເກີດເປັນມະນຸດຢູ່ໃນໝູ່ມະນຸດໃນມະນຸດສາໂລກ
ເຖິງຍາມຂ້າງແຮມເດືອນມືດ ໄດ້ໄຕ້ປະທີບຖວາຍ
ໃນເວລາທີ່ຕ້ອງເຍືອງໄຟ

[໘໑] ຜູ້ໃດເຍືອງໄຟເປັນທານໃນເວລາທີ່ຕ້ອງເຍືອງໄຟ
ໃນຍາມຂ້າງແຮມເດືອນມືດ
ວິມານມີແສງສະຫວ່າງສະໄຫວ ຫຼາຍໄປດ້ວຍສວນໄມ້ດອກ
ມີບົວຂາວຢູ່ຫຼວງຫຼາຍຍ່ອມເກີດຂຶ້ນແກ່ຜູ້ນັ້ນ

[໘໔] ຍ້ອນບຸນນັ້ນຜິວພັນຂ້ານ້ອຍຈຶ່ງງາມແນວນີ້
ຜົນອັນເພິ່ງປາຖະໜາຈຶ່ງສຳເລັດແກ່ຂ້ານ້ອຍໃນວິມານນີ້
ແລະໂພຄະທັງມວນລ້ວນໜ້າພໍໃຈຈຶ່ງເກີດຂຶ້ນແກ່ຂ້ານ້ອຍ
[໘໓] ຍ້ອນບຸນນັ້ນຂ້ານ້ອຍຈຶ່ງມີຣັດສະໝີຜ່ອງໃສໄພໂຣດລ້ຳກວ່າເທບທັງມວນ
ຍ້ອນບຸນນັ້ນຂ້ານ້ອຍຈຶ່ງມີອະໄວຍະວະທຸກສ່ວນສັດສ່ອງສະຫວ່າງໄປທົ່ວທຸກທິດ

[໘໔] ຂ້າແດ່ພິກຂຸຜູ້ມີອານຸພາບຫຼາຍ ຂ້ານ້ອຍຂໍຂາບຮຽນວ່າ
ຍ້ອນບຸນທີ່ໄດ້ເຮັດໄວ້ສະໄໝເມື່ອເກີດເປັນມະນຸດ
ຂ້ານ້ອຍຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

**ປະທີປະວິມານທີ ໗ ຈົບ**

# ໑໐. ຕິລະທັກຂິນະວິມານ

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ຍິງຜູ້ຖວາຍເມັດງາ

(ພຣະມະຫາໂມກຄັນລານະເຖຣະຖາມວ່າ)

[໗໔] ເທບທິດາ ທ່ານມີຜິວພັນງາມຍິ່ງ
ເປ່ງຣັດສະໝີສະຫວ່າງສະໄຫວໄປທົ່ວທຸກທິດຢູ່ ຄືດາວປະກາຍພຶກ

[໗໕] ຍ້ອນບຸນອັນໃດຜິວພັນທ່ານຈຶ່ງງາມແນວນີ້
ຜົນອັນເພິ່ງປາຖະໜາຈຶ່ງສຳເລັດແກ່ທ່ານໃນວິມານນີ້
ແລະໂພຄະທັງມວນລ້ວນໜ້າພໍໃຈຈຶ່ງເກີດຂຶ້ນແກ່ທ່ານ

[໗໖] ເທບທິດາຜູ້ມີອານຸພາບຫຼາຍ ອາດຕະມາຂໍຖາມວ່າ
ເມື່ອທ່ານເກີດເປັນມະນຸດໄດ້ເຮັດບຸນອັນໃດໄວ້
ຍ້ອນບຸນອັນໃດທ່ານຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

[໗໗] ເທບທິດານັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ
ຈຶ່ງຕອບບັນຫາຜົນກຳຕາມທີ່ພຣະເຖຣະຖາມວ່າ

[໗໘] ຊາດກ່ອນຂ້ານ້ອຍເກີດເປັນມະນຸດຢູ່ໃນໝູ່ມະນຸດໃນມະນຸດສາໂລກ

[໘໐] ໄດ້ເຫັນພຣະພຸດທະເຈົ້າຜູ້ປາສະຈາກກິເລດເໝືອນທຸລີ
ມີພຣະທະໄຫຜ່ອງໃສບໍ່ມົວໝອງ
ເຖິງບໍ່ໄດ້ຕັ້ງໃຈແຕ່ກໍເຫຼື້ອມໃສແລ້ວ
ໄດ້ບຸງດແຊກເຂົ້າໄປຖວາຍເມັດງາເປັນທານແດ່ພຣະພຸດທະເຈົ້າ
ຜູ້ເປັນພຣະທັກຂິໄນຍະບຸກຄົນດ້ວຍມືທັງສອງຂອງຕົນ

[໘໑] ຍ້ອນບຸນນັ້ນຜິວພັນຂ້ານ້ອຍຈຶ່ງງາມແນວນີ້
ຜົນອັນເພິ່ງປາຖະໜາຈຶ່ງສຳເລັດແກ່ຂ້ານ້ອຍໃນວິມານນີ້
ແລະໂພຄະທັງມວນລ້ວນໜ້າພໍໃຈຈຶ່ງເກີດຂຶ້ນແກ່ຂ້ານ້ອຍ

[໘໒] ຂ້າແດ່ ພິກຂຸຜູ້ມີອານຸພາບຫຼາຍ ຂ້ານ້ອຍຂໍຂາບຮຽນວ່າ
ຍ້ອນບຸນທີ່ໄດ້ເຮັດໄວ້ສະໄໝເມື່ອເກີດເປັນມະນຸດ

ຂ້ານ້ອຍຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

**ຕິລະທັກຂິນະວິມານທີ ໑໐ ຈົບ**

# ໑໑. ປະຖົມປະຕິບພະຕາວິມານ

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ຍິງຜູ້ຊື່ສັດຕໍ່ສາມີ ເລື້ອງທີ ໑

(ພຣະມະຫາໂມກຄັນລານະເຖຣະຖາມວ່າ)

[໒໓] ເຫຼົ່ານົກກະຣຽນ ນົກຍູງ ຫົງ
ນົກກາເວົາດຳແລະນົກກາເວົາຂາວ ລ້ວນເປັນທິບ
ຊຸມນຸມກັນສົ່ງສຽງມ່ວນຢູ່ຮອບວິມານນີ້
ເຊິ່ງເດຍລະດາດດ້ວຍບຸບຜະຊາດ ໜ້າອອນຊອນ ຊ່າງງາມເຫຼືອເກີນ
ທັງເທບພະບຸດແລະເທບທິດາວຽນກັນມາຊົມບໍ່ຂາດສາຍ

[໒໔] ເທບທິດາຜູ້ມີອານຸພາບຫຼາຍ
ທ່ານສະແດງລິດໄດ້ຫຼາຍ ໆ ຢູ່ໃນວິມານນັ້ນ
ອັນໜຶ່ງ ເທບອັບປະສອນເຫຼົ່ານີ້ກໍຟ້ອນລຳຂັບຮ້ອງ
ໃຫ້ຄວາມບັນເທີງຢູ່ຮອບ ໆ ທ່ານ

[໒໕] ເທບທິດາຜູ້ມີອານຸພາບຫຼາຍ
ເມື່ອທ່ານເກີດເປັນມະນຸດໄດ້ເຮັດບຸນອັນໃດໄວ້
ຈຶ່ງໄດ້ສຳເລັດເປັນເທບທິດາຜູ້ມີລິດ
ຍ້ອນບຸນອັນໃດທ່ານຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

[໒໖] ເທບທິດານັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ
ຈຶ່ງຕອບບັນຫາຜົນກຳຕາມທີ່ພຣະເຖຣະຖາມວ່າ

[໒໗] ເມື່ອຂ້ານ້ອຍເກີດເປັນມະນຸດຢູ່ໃນໝູ່ມະນຸດ
ເປັນຜູ້ຊື່ສັດ ບໍ່ນອກໃຈສາມີ
ຄອຍຖະໜອມນ້ຳໃຈ ຄືມານດາຖະໜອມບຸດ
ເຖິງແມ່ນຈະໂກດກໍບໍ່ກ່າວຄຳຫຍາບຄາຍ

[໙໗] ດຳລົງໝັ້ນຢູ່ໃນຄວາມສັດ ລະເວັ້ນການເວົ້າຕົວະ
ຍິນດີໃນການໃຫ້ທານ ມັກອຸທິດຕົນຊ່ວຍເຫຼືອຜູ້ອື່ນ
ມີຈິດເຫຼື້ອມໃສ ໄດ້ຖວາຍເຂົ້າແລະນ້ຳ
ເປັນທານຢ່າງເຫຼືອເຟືອໂດຍເຄົາລົບ

[໙໙] ຍ້ອນບຸນນັ້ນຜິວພັນຂ້ານ້ອຍຈຶ່ງງາມແບບນີ້
ຜົນອັນເພິ່ງປາຖະໜາຈຶ່ງສຳເລັດແກ່ຂ້ານ້ອຍໃນວິມານນີ້
ແລະໂພຄະທັງມວນລ້ວນໜ້າພໍໃຈຈຶ່ງເກີດຂຶ້ນແກ່ຂ້ານ້ອຍ

[໑໐໐] ຂ້າແດ່ພິກຂຸຜູ້ມີອານຸພາບຫຼາຍ ຂ້ານ້ອຍຂໍຂາບຮຽນວ່າ
ຍ້ອນບຸນທີ່ໄດ້ເຮັດໄວ້ສະໄໝເມື່ອເກີດເປັນມະນຸດ
ຂ້ານ້ອຍຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແບບນີ້

**ປະຖົມປະຕິພພະຕາວິມານທີ ໑໑ ຈົບ**

## ໑໘. ທຸຕິຍະປະຕິບພະຕາວິມານ

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ຍິງຜູ້ຊື່ສັດຕໍ່ສາມີ ເລື້ອງທີ ໘

(ພຣະມະຫາໂມກຄັນລານະເຖຣະຖາມວ່າ)

[໑໐໑] ເທບທິດາຜູ້ມີອານຸພາບຫຼາຍ
ທ່ານສະຖິດຢູ່ໃນວິມານໜ້າອອນຊອນ
ເສົາເຮັດດ້ວຍແກ້ວໄພທູນອັນໜ້າອອນຊອນ
ເປ່ງແສງເຮືອງຮອງ ງາມຜຸດຜ່ອງ
ທ່ານສະແດງລິດໄດ້ຫຼາຍ ໆ
ເທບອັບປະສອນເຫຼົ່ານີ້ກໍຟ້ອນລຳ ຂັບຮ້ອງ
ແລະໃຫ້ຄວາມບັນເທີງຢູ່ຮອບ ໆ ທ່ານ

[໑໐໘] ເທບທິດາຜູ້ມີອານຸພາບຫຼາຍ
ເມື່ອທ່ານເກີດເປັນມະນຸດໄດ້ເຮັດບຸນອັນໃດໄວ້
ຈຶ່ງໄດ້ສຳເລັດເປັນເທບທິດາຜູ້ມີລິດ ຍ້ອນບຸນອັນໃດຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແບບນີ້

[๑໐໓] ເທບທິດານັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ
ຈຶ່ງຕອບບັນຫາຜົນກຳຕາມທີ່ພຣະເຖຣະຖາມວ່າ

[໑໐໔] ເມື່ອຂ້ານ້ອຍເກີດເປັນມະນຸດຢູ່ໃນໝູ່ມະນຸດ
ເປັນອຸປາສິກາຂອງພຣະພຸດທະເຈົ້າຜູ້ຊົງມີພຣະຈັກຂຸ
ຂ້ານ້ອຍງົດເວັ້ນຈາກການຂ້າສັດ ເວັ້ນຈາກການລັກຊັບໃນໂລກ

[໑໐໕] ພໍໃຈສະເພາະສາມີຂອງຕົນ ບໍ່ກ່າວຕົວະ ບໍ່ດື່ມນ້ຳເມົາ
ມີຈິດເຫຼື້ອມໃສໄດ້ຖວາຍເຂົ້າແລະນ້ຳ
ເປັນທານຢ່າງເຫຼືອເຟືອໂດຍເຄົາລົບ

[໑໐໖] ຍ້ອນບຸນນັ້ນຜິວພັນຂ້ານ້ອຍຈຶ່ງງາມແນວນີ້
ຜົນອັນເພິ່ງປາຖະໜາຈຶ່ງສຳເລັດແກ່ຂ້ານ້ອຍໃນວິມານນີ້
ແລະໂພຄະທັງມວນລ້ວນໜ້າພໍໃຈຈຶ່ງເກີດຂຶ້ນແກ່ຂ້ານ້ອຍ

[໑໐໗] ຂ້າແດ່ພິກຂຸຜູ້ມີອານຸພາບຫຼາຍ ຂ້ານ້ອຍຂໍຂາບຮຽນວ່າ
ຍ້ອນບຸນທີ່ໄດ້ເຮັດໄວ້ສະໄໝເມື່ອເກີດເປັນມະນຸດ
ຂ້ານ້ອຍຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

**ທຸຕິຍະປະຕິບພະຕາວິມານທີ ໑ ໘ ຈົບ**

## ໑໓. ປະຖົມສຸນິສາວິມານ

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ຍິງສະໃພ້ ເລື້ອງທີ ໑

(ພຣະມະຫາໂມກຄັນລານະເຖຣະຖາມວ່າ)

[໑໐໘] ເທບທິດາ ທ່ານມີຜິວພັນງາມຍິ່ງ
ເປ່ງຣັດສະໝີສະຫວ່າງສະໄຫວໄປທົ່ວທຸກທິດຢູ່ ຄືດາວປະກາຍພຶກ

[໑໐໙] ຍ້ອນບຸນອັນໃດຜິວພັນທ່ານຈຶ່ງງາມແນວນີ້
ຜົນອັນເພິ່ງປາຖະໜາຈຶ່ງສຳເລັດແກ່ທ່ານໃນວິມານນີ້
ແລະໂພຄະທັງມວນລ້ວນໜ້າພໍໃຈຈຶ່ງເກີດຂຶ້ນແກ່ທ່ານ

[໑໑໐] ເທບທິດາຜູ້ມີອານຸພາບຫຼາຍ ອາດຕະມາຂໍຖາມວ່າ

ເມື່ອທ່ານເກີດເປັນມະນຸດໄດ້ເຮັດບຸນອັນໃດໄວ້
ຍ້ອນບຸນອັນໃດທ່ານຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

[໑໑໑] ເທບທິດານັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ
ຈຶ່ງຕອບບັນຫາຜົນກຳຕາມທີ່ພຣະເຖຣະຖາມວ່າ

[໑໑໒] ເມື່ອຂ້ານ້ອຍເກີດເປັນມະນຸດຢູ່ໃນໝູ່ມະນຸດ
ເປັນສະໃພ້(ຢູ່)ໃນເຮືອນພໍ່ປູ່

[໑໑໓] ໄດ້ເຫັນພິກຂຸຜູ້ປາສະຈາກກິເລດເໝືອນທຸລີ
ມີໃຈຜ່ອງໃສ ບໍ່ມົວໝອງ ເຫຼື້ອມໃສແລ້ວ
ໄດ້ຖວາຍເຂົ້າໜົມແດ່ທ່ານດ້ວຍມືທັງສອງຂອງຕົນ
ເມື່ອແບ່ງເຂົ້າໜົມເຄິ່ງໜຶ່ງຖວາຍແລ້ວ
ຂ້ານ້ອຍຈຶ່ງມາບັນເທີງໃຈຢູ່ໃນສວນນັນທະວັນ[໑]

[໑໑໔] ຍ້ອນບຸນນັ້ນຜິວພັນຂ້ານ້ອຍຈຶ່ງງາມແນວນີ້
ຜົນອັນເພິ່ງປາຖະໜາຈຶ່ງສຳເລັດແກ່ຂ້ານ້ອຍໃນວິມານນີ້
ແລະໂພຄະທັງມວນລ້ວນໜ້າພໍໃຈຈຶ່ງເກີດຂຶ້ນແກ່ຂ້ານ້ອຍ

[໑໑໕] ຂ້າແດ່ພິກຂຸຜູ້ມີອານຸພາບຫຼາຍ ຂ້ານ້ອຍຂໍຂາບຮຽນວ່າ
ຍ້ອນບຸນທີ່ໄດ້ເຮັດໄວ້ສະໄໝເມື່ອເກີດເປັນມະນຸດ
ຂ້ານ້ອຍຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

**ປະຖົມສຸນິສາວິມານທີ ໑໓ ຈົບ**

## ໑໔. ທຸຕິຍະສຸນິສາວິມານ

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ຍິງສະໃພ້ ເລື່ອງທີ ໘

(ພຣະມະຫາໂມກຄັນລານະເຖຣະຖາມວ່າ)

[໑໑໖] ເທບທິດາ ທ່ານມີຜິວພັນງາມຍິ່ງ
ເປ່ງຣັດສະໝີສະຫວ່າງສະໄຫວໄປທົ່ວທຸກທິດສະຖິດຢູ່ ຄືດາວປະກາຍພຶກ

[໑໑໗] ຍ້ອນບຸນອັນໃດຜິວພັນທ່ານຈຶ່ງງາມແນວນີ້
ຜົນອັນເພິ່ງປາຖະໜາຈຶ່ງສຳເລັດແກ່ທ່ານໃນວິມານນີ້
ແລະໂພຄະທັງມວນລ້ວນໜ້າພໍໃຈຈຶ່ງເກີດຂຶ້ນແກ່ທ່ານ

[໑໑໘] ເທບທິດາຜູ້ມີອານຸພາບຫຼາຍ ອາດຕະມາຂໍຖາມວ່າ
ເມື່ອທ່ານເກີດເປັນມະນຸດໄດ້ເຮັດບຸນອັນໃດໄວ້
ຍ້ອນບຸນອັນໃດທ່ານຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

[໑໑໙] ເທບທິດານັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ
ຈຶ່ງຕອບບັນຫາຜົນກຳຕາມທີ່ພຣະເຖຣະຖາມວ່າ

[໑໒໐] ເມື່ອຂ້ານ້ອຍເກີດເປັນມະນຸດຢູ່ໃນໝູ່ມະນຸດ
ເປັນສະໃພ້(ຢູ່)ໃນເຮືອນພໍ່ປູ່

[໑໒໑] ໄດ້ເຫັນພິກຂຸຜູ້ປາສະຈາກກິເລດເໝືອນທຸລີ
ມີໃຈຜ່ອງໃສ ບໍ່ມົວໝອງ
ເຫຼື້ອມໃສແລ້ວ ໄດ້ຖວາຍເຂົ້າໜົມກຸມມາດ[๑] ກ້ອນໜຶ່ງ
ແດ່ທ່ານດ້ວຍມືທັງສອງຂອງຕົນ ເມື່ອຖວາຍແລ້ວ
ຂ້ານ້ອຍຈຶ່ງມາບັນເທີງໃຈຢູ່ໃນສວນນັນທະວັນ

[໑໒໒] ຍ້ອນບຸນນັ້ນຜິວພັນຂ້ານ້ອຍຈຶ່ງງາມແນວນີ້
ຜົນອັນເພິ່ງປາຖະໜາຈຶ່ງສຳເລັດແກ່ຂ້ານ້ອຍໃນວິມານນີ້
ແລະໂພຄະທັງມວນລ້ວນໜ້າພໍໃຈຈຶ່ງເກີດຂຶ້ນແກ່ຂ້ານ້ອຍ

[໑໒໓] ຂ້າແດ່ພິກຂຸຜູ້ມີອານຸພາບຫຼາຍ ຂ້ານ້ອຍຂໍຂາບຮຽນວ່າ
ຍ້ອນບຸນທີ່ໄດ້ເຮັດໄວ້ສະໄໝເມື່ອເກີດເປັນມະນຸດ
ຂ້ານ້ອຍຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

**ທຸຕິຍະສຸນິສາວິມານທີ ໑໔ ຈົບ**

# ໑໕. ອຸດຕະຣາວິມານ

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ນາງອຸດຕະຣາ

(ພຣະມະຫາໂມກຄັນລານະເຖຣະຖາມວ່າ)

[໑໘໔] ເທບທິດາ ທ່ານມີຜິວພັນງາມຍິ່ງ
ເປ່ງຣັດສະໝີສະຫວ່າງສະໄຫວໄປທົ່ວທຸກທິດຢູ່ ຄືດາວປະກາຍພຶກ

[໑໘໕] ຍ້ອນບຸນອັນໃດຜິວພັນທ່ານຈຶ່ງງາມແນວນີ້
ຜົນອັນເພິ່ງປາຖະໜາຈຶ່ງສຳເລັດແກ່ທ່ານໃນວິມານນີ້
ແລະໂພຄະທັງມວນລ້ວນໜ້າພໍໃຈຈຶ່ງເກີດຂຶ້ນແກ່ທ່ານ

[໑໘໖] ເທບທິດາຜູ້ມີອານຸພາບຫຼາຍ ອາດຕະມາຂໍຖາມວ່າ
ເມື່ອທ່ານເກີດເປັນມະນຸດໄດ້ເຮັດບຸນອັນໃດໄວ້
ຍ້ອນບຸນອັນໃດທ່ານຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

[໑໘໗] ເທບທິດານັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ
ຈຶ່ງຕອບບັນຫາຜົນກຳຕາມທີ່ພຣະເຖຣະຖາມວ່າ
[໑໘໘] ເມື່ອຂ້ານ້ອຍຍັງຄອງເຮືອນຢູ່
ບໍ່ໄດ້ມີຄວາມຣິດສະຫຍາ ຄວາມຂີ້ຖີ່ ຄວາມຕີສະເໝີ
ຂ້ານ້ອຍມີນິໄສບໍ່ມັກຄຽດ ປະພຶດຕາມຄຳສັ່ງສາມີ
ແລະບໍ່ຜະໝາດໃນການຮັກສາສິນອຸໂປສົດຢູ່ປະຈຳ

[໑໘໙] ຂ້ານ້ອຍເຂົ້າຈຳອຸໂປສົດສິນເຊິ່ງປະກອບດ້ວຍອົງ ໘
ທຸກມື້ ໑໔ ຄ່ຳ໑ ໑໕ ຄ່ຳແລະ ໘ ຄ່ຳແຫ່ງປັກ
ແລະຕະຫຼອດປາຕິຫາຣິຍະປັກ [໒]

[໑໙໐] ຂ້ານ້ອຍສັງລວມລະວັງໃນສິນຕະຫຼອດເວລາ
ແລະແຈກຈ່າຍທານດ້ວຍຄວາມເຄົາລົບ ຈຶ່ງໄດ້ຄອບຄອງວິມານນີ້

[໑໙໑] ຂ້ານ້ອຍງົດເວັ້ນຈາກການຂ້າສັດ ຈາກການລັກຂະໂມຍ
ຈາກການປະພຶດນອກໃຈສາມີ ສັງລວມລະວັງຈາກການເວົ້າຕົວະ
ແລະເວັ້ນໄກການດື່ມນ້ຳເມົາ

[໑໓໘] ຂ້ານ້ອຍຍິນດີໃນສິນ ໕ ສະຫຼາດໃນອະຣິຍະສັດ
ເປັນອຸປາສິກາຂອງພຣະຜູ້ມີພຣະພາກເຈົ້າຊົງພຣະນາມວ່າໂຄດົມ
ຜູ້ມີພຣະຈັກຂຸ ມີພຣະຍົດ

[໑໓໙] ຍ້ອນສິນຂອງຕົນ ຂ້ານ້ອຍນັ້ນຈຶ່ງມີກຽດຕິຍົດບໍລິວານຍົດ
ສະເຫວີຍຜົນບຸນຂອງຕົນຢູ່ເປັນສຸກ ຂາດພະຍາດ

[໑໓໔] ຍ້ອນບຸນນັ້ນຜິວພັນຂ້ານ້ອຍຈຶ່ງງາມແບບນີ້
ຜົນອັນເພິ່ງປາຖະໜາຈຶ່ງສຳເລັດແກ່ຂ້ານ້ອຍໃນວິມານນີ້
ແລະໂພຄະທັງມວນລ້ວນໜ້າພໍໃຈຈຶ່ງເກີດຂຶ້ນແກ່ຂ້ານ້ອຍ

[໑໓໕] ຂ້າແດ່ພິກຂຸຜູ້ມີອານຸພາບຫຼາຍ ຂ້ານ້ອຍຂໍຂາບຮຽນວ່າ
ຍ້ອນບຸນທີ່ໄດ້ເຮັດໄວ້ສະໄໝເມື່ອເກີດເປັນມະນຸດ
ຂ້ານ້ອຍຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແບບນີ້

(ເທບທິດາໄດ້ຂາບຮຽນຕໍ່ໄປວ່າ)

[໑໓໖] ພຣະຜູ້ເປັນເຈົ້າຜູ້ຈະເລີນ ຂໍທ່ານເພິ່ງຖວາຍອະພິວາດພຣະບາດທັງສອງຂອງພຣະຜູ້ມີພຣະພາກເຈົ້າດ້ວຍຂະໜ່ອມ (ແລ້ວຂາບທູນ) ຕາມຄຳຂອງຂ້ານ້ອຍວ່າ ອຸດຕະຣາອຸປາສິກາຖວາຍອະພິວາດພຣະບາດທັງສອງຂອງພຣະຜູ້ມີພຣະພາກເຈົ້າດ້ວຍຂະໜ່ອມ ຂ້ານ້ອຍຂ້າແດ່ ພຣະອົງຜູ້ຈະເລີນ ຂໍ້ທີ່ພຣະຜູ້ມີພຣະພາກເຈົ້າ ຊົງພະຍາກອນຂ້ານ້ອຍວ່າ ຈະໄດ້ບັນລຸສາມັນຜົນຂັ້ນໃດຂັ້ນໜຶ່ງນັ້ນ ບໍ່ໜ້າອັດສະຈັນທໍ່ກັບທີ່ຊົງພະຍາກອນຂ້ານ້ອຍວ່າ ຈະໄດ້ບັນລຸສະກະທາຄາມິຜົນເລີຍ

**ອຸດຕະຣາວິມານທີ ໑໕ ຈົບ**

## ໑໖. ສິຣິມາວິມານ

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ນາງສິຣິມາ

(ພຣະວັງຄີສະປະສົງຈະໃຫ້ນາງສິຣິມາ[໑]ເທບທິດາປະກາດບຸນກຳທີ່ນາງໄດ້ເຮັດໄວ້ໃນຄັ້ງກ່ອນຈຶ່ງຖາມນາງດ້ວຍຄາຖາເຫຼົ່ານີ້ວ່າ)

[໑໓໗] ມ້າສຳລັບຫຼຽມລົດຂອງທ່ານ ຕົກແຕ່ງດ້ວຍເຄື່ອງປະດັບຊັ້ນດີຢັ່ງມ

ມີພະລັງ ແຄ່ວຄ່ອງວ່ອງໄວ ເຫາະທະຍານລົງໄປ
ລົດທຽມມ້າ ໕໐໐ ຄັນ ທີ່ບຸນກຸສົນເນຣະມິດເພື່ອທ່ານ
ແລະມ້າເຫຼົ່ານັ້ນຄືຖືການາຍສາຣະຖີກະຕຸ້ນເຕືອນ
ຍ່ອມແລ່ນນຳທ່ານໄປ

[໑໓໗] ທ່ານປະດັບອົງ ສະຖິດເທິງລົດອັນເລີເລີດ
ເປ່ງຣັດສະໝີສະຫວ່າງຮຸ່ງເຮືອງຢູ່ເໝືອນດວງໄຟອັນສະຫວ່າງສະໄຫວ
ເທບທິດາຜູ້ມີຮູບງາມ ໜ້າຊົມ ແນມແລ້ວບໍ່ເບື່ອ ອາດຕະມາຂໍຖາມວ່າ
ທ່ານມາຈາກເທບໝູ່ໃດນໍຈຶ່ງເຂົ້າມາເຝົ້າພຣະສຳມາສຳພຸດທະເຈົ້າ
ເຊິ່ງຫາໃຜເລີດຍິ່ງກວ່າບໍ່ໄດ້ແລ້ວ

(ສິຣິມາເທບທິດານັ້ນຕອບພຣະເຖຣະວ່າ)

[໑໓໘] ຖັດລົງມາຈາກໝູ່ປະຣະນິມມິຕະວະສະວັດດີເທບ°ຜູ້ເຖິງຄວາມເປັນເລີດ
ດ້ວຍກາມມະຄຸນ ທີ່ບັນດິດກ່າວຊົມວ່າປະເສີດນັ້ນ
ມີນິມມານະຣະດີເທບເຊິ່ງເນຣະມິດສົມບັດໄດ້ເອງແລ້ວຊົມຊື່ນຢູ່
ຂ້ານ້ອຍ ເປັນນາງອັບປະສອນຈາກໝູ່ນິມມານະຣະດີເທບນັ້ນ
ເຊິ່ງມີຮູບຮ່າງໜ້າເພິ່ງໃຈປະສົງຈະນະມັດສະການພຣະສຳມາສຳພຸດທະເຈົ້າ
ເຊິ່ງຫາໃຜເລີດຍິ່ງກວ່າບໍ່ໄດ້ ຈຶ່ງມາສູ່ມະນຸດສາໂລກນີ້

(ພຣະເຖຣະຖາມວ່າ)

[໑໔໐] ຊາດກ່ອນແຕ່ຈະມາເປັນເທບທິດານີ້
ທ່ານໄດ້ປະພຶດສຸດຈະຣິດກຳອັນໃດໄວ້
ຍ້ອນບຸນອັນໃດທ່ານຈຶ່ງມີບໍລິວານຍົດຢູ່ຫຼວງຫຼາຍ ປ່ຽມໄປດ້ວຍຄວາມສຸກ
ອັນໜຶ່ງ ທ່ານມີລົດທີ່ຫາລົດໃດທຽມທໍ່ບໍ່ໄດ້
ເຫາະໄປໃນອາກາດໄດ້ ທັງມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວສິບທິດ

[໑໔໑] ເທບທິດາ ອັນໜຶ່ງ ທ່ານມີມວນເທບຫ້ອມລ້ອມ ສັກກາຣະ
ທ່ານຈຸຕິມາຈາກຄະຕິ°ໃດຈຶ່ງມາເຖິງສຸກຄະຕິພົບນີ້
ຫຼືວ່າທ່ານໄດ້ເຮັດຕາມຄຳສອນຂອງພຣະສາດສະດາພຣະອົງໃດ
ຫາກທ່ານເປັນສາວິກາຂອງພຣະພຸດທະເຈົ້າຈິງ ຂໍຈົ່ງບອກອາດຕະມາເທີ້ນ

(ສິຣິມາເທບທິດາຕອບວ່າ)

[໑໔໘] ຂ້ານ້ອຍເປັນພຣະສະໜົມຂອງພຣະຣາຊາຜູ້ຊົງພຣະຄຸນອັນປະເສີດ ໆ
ມີພຣະສິຣິ ຢູ່ໃນພຣະນະຄອນເຊິ່ງສະຖາປະນາໄວ້ເປັນຢ່າງດີທ່າມກາງຊຸນເຂົາ
ມີຄວາມຊ່ຽວຊານຢ່າງຍິ່ງໃນການຟ້ອນລຳ ຂັບຮ້ອງ
ຊາວເມືອງຣາດຊະຄຶໄດ້ພາກັນຮຽກຂານຂ້ານ້ອຍວ່າ ສິຣິມາ

[໑໔໙] ພຣະພຸດທະເຈົ້າຊົງອົງອາດກວ່າໝູ່ຜູ້ເປັນລືສີ ຊົງແນະນຳເວໄນຍະສັດ
ໄດ້ຊົງສະແດງທຸກຂະສັດແລະສະມຸໄທສັດວ່າເປັນສະພາວະທີ່ບໍ່ທ່ຽງ
ຊົງສະແດງທຸກຂະນິໂຣທະສັດ
ເຊິ່ງປາສະຈາກປັດໄຈປຸງແຕ່ງວ່າເປັນສະພາວະຖາວອນ
ແລະຊົງສະແດງມັກສັດນີ້ເຊິ່ງເປັນທາງບໍ່ອ້ອມຄ້ອມ
ເປັນທາງກົງ ແລະເປັນທາງປອດໂປ່ງແກ່ຂ້ານ້ອຍ

[໑໕໐] ຂ້ານ້ອຍເມື່ອຟັງທຳອັນເປັນທາງບໍ່ຕາຍ ປາສະຈາກປັດໄຈປຸງແຕ່ງ
ເປັນຄຳສອນຂອງພຣະຕະຖາຄົດເຈົ້າຜູ້ຫາໃຜເລີດຍິ່ງກວ່າບໍ່ໄດ້
ສັງລວມໃນສິນທັງຫຼາຍຢ່າງເຄັ່ງຄັດເປັນອັນດີ
ໝັ້ນຢູ່ໃນທຳທີ່ພຣະພຸດທະເຈົ້າຜູ້ເລີດກວ່ານໍຣະຊົນຊົງສະແດງໄວ້ແລ້ວ

[໑໕໑] ເມື່ອຮູ້ທາງທີ່ປາສະຈາກກິເລດເໝືອນທຸລີເຊິ່ງປາສະຈາກປັດໄຈປຸງແຕ່ງ
ອັນພຣະຕະຖາຄົດເຈົ້າຜູ້ຫາໃຜເລີດຍິ່ງກວ່າບໍ່ໄດ້ຊົງສະແດງໄວ້ແລ້ວ
ໄດ້ສຳຜັດສະມະຖະສະມາທິ[໑] ໃນອັດຕະພາບນັ້ນເອງ
ການໄດ້ສຳຜັດສະມະຖະສະມາທິນັ້ນແລ
ເປັນພາວະແນ່ນອນຢ່າງຍິ່ງສຳລັບຂ້ານ້ອຍ

[໑໕໒] ຂ້ານ້ອຍໄດ້ອະມະຕະທຳອັນປະເສີດ ທີ່ເຮັດໃຫ້ຕ່າງຈາກປຸຖຸຊົນ
ມີຄວາມເຊື່ອໝັ້ນ[໒] ບັນລຸຄຸນວິເສດຍ້ອນຮູ້ແຈ້ງ ໆ ແລ້ວ
ໝົດຄວາມລັງເລສົງໄສ ໄດ້ຮັບການບູຊາຈາກຄົນຈຳນວນຫຼາຍ
ສະເຫວີຍຄວາມຍິນດີບໍ່ໜ້ອຍ

[໑໕໓] ຕາມທີ່ຂາບຮຽນມານີ້ ຂ້ານ້ອຍຈຶ່ງເປັນເທບທິດາຜູ້ເຫັນອະມະຕະທຳ
ເປັນສາວິກາຂອງພຣະຕະຖາຄົດເຈົ້າຜູ້ຫາໃຜເລີດຍິ່ງກວ່າບໍ່ໄດ້
ໄດ້ເຫັນທຳ ດຳລົງຢູ່ໃນໂສດາປັດຕິຜົນ ເປັນໂສດາບັນບຸກຄົນ
ທຸກຄະຕິເປັນອັນບໍ່ມີແກ່ຂ້ານ້ອຍອີກແລ້ວ

[໑໕໔] ຂ້ານ້ອຍນັ້ນມາໝາຍຈະຖວາຍອະພິວາດ

ພຣະສຳມາສຳພຸດທະເຈົ້າຜູ້ຫາໃຜເລີດຍິ່ງກວ່າບໍ່ໄດ້
ໝາຍຈະນະມັດສະການບັນດາພິກຂຸຜູ້ໜ້າເຫຼື້ອມໃສ ເຊິ່ງຍິນດີໃນກຸສົນທຳ[๑]
ແລະໝາຍຈະເຂົ້າໄປນັ່ງໃກ້ສະມາຄົມຂອງສະມະນະທີ່ປອດໄພ
ຂ້ານ້ອຍມີຄວາມເຄົາລົບພຣະທຳຣາຊາ
ຄື ພຣະສຳມາສຳພຸດທະເຈົ້າຜູ້ຊົງສິຣິ

[໑໔໙] ເມື່ອໄດ້ເຫັນພຣະຈອມມຸນີແລ້ວ
ຂ້ານ້ອຍກໍມີໃຈເບີກບານ ເອີບອີ່ມ
ຈຶ່ງຂໍຖວາຍອະພິວາດພຣະອົງຜູ້ເປັນພຣະຕະຖາຄົດເລີດກວ່ານໍຣະຊົນ
ຊົງເຝິກຄົນທີ່ຄວນເຝິກ ຊົງຕັດຕັນຫາໄດ້ ຊົງຍິນດີໃນກຸສົນທຳ
ຊົງແນະນຳເວໄນຍະສັດໃຫ້ຂ້າມພົ້ນຈາກທຸກໄດ້
ຊົງຊ່ວຍເຫຼືອສັດໂລກດ້ວຍຄວາມເກື້ອກູນຢ່າງຍິ່ງ

**ສິຣິມາວິມານທີ ໑໖ ຈົບ**

## ໑໗. ເປສະກາຣິຍະວິມານ

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ທິດາຊ່າງຫູກ

**(ທ້າວສັກກະຕັດຖາມເທບທິດາວ່າ)**

[໑໕໐] ວິມານນີ້ໜ້າອອນຊອນ ເສົາເຮັດດ້ວຍແກ້ວໄພທູນ
ເປັ່ງແສງເຮືອງຮອງຢູ່ປະຈຳ
ຈັດໄວ້ເປັນສັດສ່ວນຢ່າງດີ ມີຕົ້ນໄມ້ຄຳຂຶ້ນຮອບດ້ານ
ເປັນສະຖານທີ່ເກີດມີຍ້ອນຜົນກຳຂອງເຮົາ

[໑໕໑] ເທບອັບປະສອນເຊິ່ງມີຢູ່ກ່ອນຕັ້ງແສນເຫຼົ່ານີ້
ເກີດໃນວິມານນັ້ນດ້ວຍກຳຂອງຕົນ
ທ່ານກໍເກີດເອງດ້ວຍກຳຂອງຕົນ ມີບໍລິວານຍົດ
ເປັ່ງຣັດສະໝີຂົ່ມເຫຼົ່າເທບອັບປະສອນຜູ້ເກີດກ່ອນຢູ່

[໑໕໒] ທ່ານຜູ້ຊົງບໍລິວານຍົດ ເປັ່ງຣັດສະໝີຮຸ່ງເຮືອງຂົ່ມໝູ່ເທບອັບປະສອນນີ້ຢູ່
ປະໜຶ່ງພຣະຈັນ ຜູ້ເປັນຣາຊາແຫ່ງດາວເລີກ
ສ່ອງແສງສະກາວຂົ່ມໝູ່ດາວຢູ່ສັນນັ້ນແລ

[໑໕໓] ນາງເທບທິດາຜູ້ໜ້າຊື່ນ ແນມແລ້ວບໍ່ເບື່ອ
ທ່ານມາຈາກໄສນໍຈຶ່ງອຸບັດຍັງພິບຂອງເຮົານີ້
ເຮົາທັງມວນແນມເບິ່ງທ່ານບໍ່ຮູ້ຈັກອີ່ມ ຄືທວຍເທບຊັ້ນໄຕຣທິດໆ
ລວມທັງພຣະອິນແນມເບິ່ງພຣະພິມບໍ່ຮູ້ຈັກອີ່ມ

(ເທບທິດາຜູ້ອັນທ້າວສັກກະເທວະຣາດຕັດຖາມແນວນັ້ນແລ້ວ ເມື່ອຈະປະກາດເນື້ອຄວາມ ນັ້ນ ຈຶ່ງກ່າວຕອບເປັນ ໔ ຄາຖາວ່າ)

[໑໕໔] ຂ້າແດ່ ທ້າວສັກກະ ຂໍ້ທີ່ພຣະອົງຮັບສັ່ງຖາມຂ້ານ້ອຍວ່າ
ທ່ານຈຸຕິຈາກພົບໃດຈຶ່ງໄດ້ມາເກີດທີ່ບພຂອງເຮົານີ້
ຂ້ານ້ອຍຂໍສະເຫຼີຍວ່າ ເມື່ອຊາດກ່ອນຂ້ານ້ອຍເກີດເປັນທິດາຂອງຊ່າງຫູກ
ຢູ່ໃນນະຄອນພາຣານະສີເຊິ່ງເປັນຣາດຊະທານີແຄວ້ນກາສີ

[໑໕໕] ຂ້ານ້ອຍມີໃຈເຫຼື້ອມໃສໃນພຣະພຸດ ພຣະທຳແລະພຣະສົງ
ເຊື່ອໝັ້ນບໍ່ຫວັ່ນໄຫວ ໝົດຄວາມສົງໄສ
ໄດ້ຮັກສາສິກຂາບົດ (ສິນ) ບໍ່ໃຫ້ຂາດ
ບັນລຸອະຣິຍະຜົນມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າໆ ບໍ່ມີທຸກ

(ເມື່ອຈະຊົງຊົມຊື່ນບຸນສົມບັດແລະທິບພະຍະສົມບັດຂອງເທບທິດານັ້ນ ທ້າວສັກກະເທວະຣາດ ຈຶ່ງຕັດຄາຖາເຄິ່ງ ຄວາມວ່າ)

[໑໕໖] ນາງເທບທິດາຜູ້ມີໃຈເຫຼື້ອມໃສໃນພຣະພຸດ ພຣະທຳແລະພຣະສົງ
ເຊື່ອໝັ້ນບໍ່ຫວັ່ນໄຫວ ໝົດຄວາມສົງໄສ ຮັກສາສິກຂາບົດບໍ່ໃຫ້ຂາດ
ບັນລຸອະຣິຍະຜົນ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ
ບໍ່ມີທຸກ ເຮົາຂໍສະແດງຄວາມຊົມຊື່ນຕໍ່ບຸນສົມບັດແລະທິບພະສົມບັດຂອງທ່ານນັ້ນ
ແລະຂໍສະແດງຄວາມຍິນດີຕໍ່ການມາດີຂອງທ່ານ
ທ່ານກໍຮຸ່ງເຮືອງດ້ວຍທຳແລະບໍລິວານຍົດ

**ເປສະກາຣິຍະວິມານທີ ໑໗ ຈົບ**

## ລວມເລື້ອງວິມານທີ່ມີໃນວັກນີ້ ຄື

| | |
|---|---|
| ໑. ປະຖົມປີຖະວິມານ | ໒. ທຸຕິຍະປີຖະວິມານ |
| ໓. ຕະຕິຍະປີຖະວິມານ | ໔. ຈະຕຸດຖະປີຖະວິມານ |
| ໕. ກຸນຊະຣະວິມານ | ໖. ປະຖົມນາວາວິມານ |

໗. ທຸຕິຍະນາວາວິມານ
໙. ປະທີປະວິມານ
໑໑. ປະຖົມປະຕິບພະຕາວິມານ
໑໓. ປະຖົມສຸນິສາວິມານ
໑໕. ອຸດຕະຣາວິມານ
໑໗. ເປສະກາຣິຍະວິມານ

໘. ຕະຕິຍະນາວາວິມານ
໑໐. ຕິລະທັກຂິນະວິມານ
໑໒. ທຸຕິຍະປະຕິບພະຕາວິມານ
໑໔. ທຸຕິຍະສຸນິສາວິມານ
໑໖. ສີຣິມາວິມານ

ທ່ານຮຽກວ່າ ວັກ ດ້ວຍການລວມເລື້ອງວິມານນັ້ນ

**ປີຖະວັກທີ ໑ ຈົບ**

# ໔. ຈິດຕະລະຕາວັກ

## ໝວດວ່າດ້ວຍສວນຈິດລະດາຂອງເຫຼົ່າເທວະດາ

## ໑. ທາສີວິມານ

### ວ່າດ້ວຍວິມານທີ່ເກີດຂຶ້ນແກ່ຍິງຄົນໃຊ້

(ພຣະມະຫາໂມກຄັນລານະເຖຣະຖາມວ່າ)

[໑໕໗] ທ່ານມີໝູ່ເທບນາຣີຫ້ອມລ້ອມ ຄືທ້າວສັກກະເທວະຣາດ
ທ່ຽວຊົມໄປໂດຍຮອບໃນສວນຈິດລະດາອັນໜ້າອອນຊອນ
ເປັ່ງຣັດສະໝີສະຫວ່າງສະໄຫວໄປທົ່ວທຸກທິດຢູ່ ຄືດາວປະກາຍພຶກ

[໑໕໘] ຍ້ອນບຸນອັນໃດຜິວພັນທ່ານຈຶ່ງງາມແນວນີ້
ຜົນອັນເພິ່ງປາຖະໜາຈຶ່ງສຳເລັດແກ່ທ່ານໃນວິມານນີ້
ແລະໂພຄະທັງມວນລ້ວນໜ້າພໍໃຈຈຶ່ງເກີດຂຶ້ນແກ່ທ່ານ

[໑໕໙] ເທບທິດາຜູ້ມີອານຸພາບຫຼາຍ ອາດຕະມາຂໍຖາມວ່າ
ເມື່ອທ່ານເກີດເປັນມະນຸດໄດ້ເຮັດບຸນອັນໃດໄວ້
ຍ້ອນບຸນອັນໃດທ່ານຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

[໑໖໐] ເທບທິດານັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ

ຈຶ່ງຕອບບັນຫາຜົນກຳໄປຕາມທີ່ພຣະເຖຣະຖາມວ່າ

[໑໙໑] ເມື່ອຂ້ານ້ອຍເກີດເປັນມະນຸດຢູ່ໃນໝູ່ມະນຸດ
ເປັນຄົນໃຊ້ ເຮັດວຽກຮັບໃຊ້ຜູ້ອື່ນຢູ່ໃນສະກຸນໜຶ່ງ

[໑໙໒] ເປັນອຸປາສິກາຂອງພຣະໂຄດົມສຳມາສຳພຸດທະເຈົ້າ
ຜູ້ຊົງມີພຣະຈັກຂຸ ຊົງພຣະຍົດ
ຂ້ານ້ອຍໄດ້ມີຄວາມພາກພຽນອອກຈາກກິເລດ
ໃນສາດສະໜາຂອງພຣະສາດສະດາຜູ້ຊົງພຣະຄຸນໝັ້ນຄົງ
ຍ້ອນມີມະນະສິການໝັ້ນຢູ່ໃນໃຈວ່າ

[໑໙໓] ແມ່ນເຖິງຮ່າງກາຍນີ້ຈະແຕກສະຫຼາຍໄປກໍຕາມທີ
ການທີ່ເຮົາຈະຢຸດຄວາມພຽນໃນການຈະເລີນກຳຖານນີ້
ຈະບໍ່ມີເປັນອັນຂາດ

[໑໙໔] ຂໍເຊີນທ່ານເບິ່ງຜົນແຫ່ງຄວາມພຽນອອກຈາກກິເລດ
ເຊິ່ງຂ້ານ້ອຍຜູ້ມີຄວາມຮູ້ໜ້ອຍ ໄດ້ບັນລຸອະຣິຍະມັກ
ອັນມີສິກຂາບົດ ໕ ເປັນອຸປະນິໄສ
ເປັນທາງໂດຍປອດໄພ ເປັນເຫດເຖິງຄວາມກະເສມ
ບໍ່ມີຂວາກໜາມຄືກິເລດ ເປັນສະພາວະທີ່ (ຕັນຫາແລະທິດຖິ)
ຢຶດໜ່ຽວບໍ່ໄດ້ ເປັນທາງກົງທີ່ສັດຕະບຸຣຸດທັງຫຼາຍປະກາດແລ້ວນີ້ເທີ້ນ

[໑໙໕] ທ້າວສັກກະເທວະຣາດຜູ້ຊົງອຳນາດເຊີນຂ້ານ້ອຍມາ
ເຫຼົ່າດຸຣິຍະເທບຫົກໝື່ນອົງ ຊ່ອຍກັນສຸກຍູ້ ຂ້ານ້ອຍ ໃຫ້ເກີດປີຕິໂສມະນັດ

[໑໙໖] ໄດ້ແກ່ ເທບພະບຸດມີນາມວ່າ ອາລຳພະ
ຄັກຄະຣະ ພີມະ ສາທຸວາທີ ປະສັງຊິຍະ
ໂປກະຂະຣະແລະສຸຜັດສະ ເຫຼົ່າເທບທິດານ້ອຍ ໆ ມີນາມວ່າ ວີນາ ໂມກຂາ

[໑໙໗] ນັນທາ ສຸນັນທາ ໂສນະທິນນາ ສຸຈິມະທິຕາ
ອະລຳພຸສາ ມິດສະເກສີແລະບຸນທະຣິກາ

[໑໙໘] ອັນໜຶ່ງ ເທບກັນຍາອີກພວກໜຶ່ງ ຄື ເອນິປັດສາ ສຸຜັດສາ ສຸພັນທາ
ແລະມຸທຸວາທີນີ ຜູ້ປະເສີດກວ່ານາງອັບປະສອນທັງຫຼາຍ
ຜູ້ມີໜ້າທີ່ປຸກເຮົ້າໃຫ້ເກີດປີຕິໂສມະນັດ

[໑໖໙] ເທວະດາເຫຼົ່ານັ້ນ ພໍໄດ້ເວລາກໍເຂົ້າມາຫາຂ້ານ້ອຍ
ສະເໜີສະໜອງດ້ວຍວາຈາໜ້າຍິນດີວ່າ
ຖ້າຈັ່ງຊັ້ນແລ້ວ ພວກເຮົາຈັກຟ້ອນລຳ ຂັບຮ້ອງ ປິ່ນເປີທ່ານໃຫ້ອອນຊອນ

[໑໗໐] ສະຖານທີ່ທີ່ຂ້ານ້ອຍໄດ້ຮັບໃນບັດນີ້
ບໍ່ແມ່ນສະຖານທີ່ສຳລັບຄົນທີ່ບໍ່ໄດ້ເຮັດບຸນໄວ້
ແຕ່ເປັນສະຖານທີ່ສຳລັບຄົນທີ່ໄດ້ເຮັດບຸນໄວ້ແລ້ວທໍ່ນັ້ນ
ບໍ່ມີຄວາມໂສກ ໜ້າເພີດເພີນ ຈະເລີນໃຈ
ເປັນອຸທະຍານກວ້າງໃຫຍ່ຂອງເຫຼົ່າເທບຊັ້ນໄຕຣທິດ

[໑໗໑] ສຳລັບຜູ້ທີ່ບໍ່ໄດ້ເຮັດບຸນໄວ້ຍ່ອມບໍ່ມີຄວາມສຸກທັງໂລກນີ້ແລະໂລກໜ້າ
ສ່ວນຜູ້ທີ່ໄດ້ເຮັດບຸນໄວ້ແລ້ວຍ່ອມມີຄວາມສຸກທັງໂລກນີ້ແລະໂລກໜ້າແນ່ນອນ

[໑໗໒] ຜູ້ປາຖະໜາຈະສະຖິດຢູ່ຮ່ວມກັບເທບຊັ້ນຕາວະຕິງສາເຫຼົ່ານັ້ນ
ຄວນເຮັດກຸສົນໄວ້ໃຫ້ຫຼາຍ
ຍ້ອນວ່າເຫຼົ່າຊົນຜູ້ໄດ້ເຮັດບຸນໄວ້ແລ້ວຍ່ອມພ້ອມພຽງດ້ວຍໂພຄະສົມບັດ
ບັນເທີງຢູ່ໃນສະຫວັນ

**ທາສີວິມານທີ ໑ ຈົບ**

# ໔. ລະຂຸມາວິມານ

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ນາງລະຂຸມາອຸປາສິກາ

(ພຣະມະຫາໂມກຄັນລານະເຖຣະຖາມວ່າ)

[໑໗໓] ເທບທິດາ ທ່ານມີຜິວພັນງາມຍິ່ງ
ເປ່ງຣັດສະໝີສະຫວ່າງສະໄຫວໄປທົ່ວທຸກທິດຢູ່ ຄືດາວປະກາຍພຶກ

[໑໗໔] ຍ້ອນບຸນອັນໃດຜິວພັນທ່ານຈຶ່ງງາມແນວນີ້
ຜົນອັນເພິ່ງປາຖະໜາຈຶ່ງສຳເລັດແກ່ທ່ານໃນວິມານນີ້
ແລະໂພຄະທັງມວນລ້ວນໜ້າພໍໃຈຈຶ່ງເກີດຂຶ້ນແກ່ທ່ານ

[໑໗໕] ເທບທິດາຜູ້ມີອານຸພາບຫຼາຍ ອາດຕະມາຂໍຖາມວ່າ
ເມື່ອທ່ານເກີດເປັນມະນຸດໄດ້ເຮັດບຸນອັນໃດໄວ້

ຍ້ອນບຸນອັນໃດທ່ານຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້
[໑໗໖] ເທບທິດານັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ
ຈຶ່ງຕອບບັນຫາຜົນກຳໄປຕາມທີ່ພຣະເຖຣະຖາມວ່າ

[໑໗໗] (ເມື່ອຂ້ານ້ອຍເກີດເປັນມະນຸດ ເປັນຊາວເມືອງພາຣານະສີ
ເຮືອນຂອງຂ້ານ້ອຍຕັ້ງຢູ່ໃກ້ທາງອອກ)
ອອກຈາກປະຕູເກວັດຕະທະວາຣະ⁹ໄປ ກໍເປັນໝູ່ບ້ານຂອງຂ້ານ້ອຍ
ພຣະສາວົກທັງຫຼາຍຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
ທ່ຽວບິນທະບາດຢູ່ໃນໝູ່ບ້ານນັ້ນ

[໑໗໘] ຂ້ານ້ອຍມີໃຈເຫຼື້ອມໃສໃນພຣະສາວົກທັງຫຼາຍຜູ້ປະຕິບັດກົງ
ຈຶ່ງໄດ້ຖວາຍເຂົ້າສຸກ ເຂົ້າໜົມສົດ ສົ້ມຜັກ
ພ້ອມທັງເຄື່ອງດື່ມທີ່ປຸງດ້ວຍສ່ວນປະສົມຕ່າງ ໆ ມີເຂົ້າແລະເກືອເປັນຕົ້ນ

[໑໗໙] ຂ້ານ້ອຍເຂົ້າຈຳອຸໂປສົດສິນ ເຊິ່ງປະກອບດ້ວຍອົງ ໘
ທຸກມື້ ໑໔ ຄ່ຳ ໑໕ ຄ່ຳແລະ ໘ ຄ່ຳແຫ່ງປັກ
ແລະເມີດມື້ປາຕິຫາຣິຍະປັກ

[໑໘໐] ຂ້ານ້ອຍຜູ້ສັງລວມລະວັງໃນສິນຕະຫຼອດເວລາ
ແລະແຈກຈ່າຍທານດ້ວຍຄວາມເຄົາລົບ ຈຶ່ງໄດ້ຄອບຄອງວິມານນີ້

[໑໘໑] ຂ້ານ້ອຍງົດເວັ້ນຈາກການຂ້າສັດ ເວັ້ນໄກຈາກການລັກຂະໂມຍ
ການປະພຶດນອກໃຈສາມີ ສັງລວມລະວັງຈາກການເວົ້າຕົວະ
ແລະການດື່ມນ້ຳເມົາ

[໑໘໒] ຂ້ານ້ອຍຍິນດີໃນສິນ ໕ ສະຫຼາດໃນອະຣິຍະສັດ
ເປັນອຸປາສິກາຂອງພຣະຜູ້ມີພຣະພາກເຈົ້າຊົງພຣະນາມວ່າໂຄດົມ
ຜູ້ມີພຣະຈັກຂຸ ມີພຣະຍົດ

[໑໘໓-໑໘໔] ຍ້ອນບຸນນັ້ນຜິວພັນຂ້ານ້ອຍຈຶ່ງງາມແນວນີ້ ฯລฯ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

ພຣະຜູ້ເປັນເຈົ້າຜູ້ຈະເລີນ ຂໍທ່ານເພິ່ງຖວາຍອະພິວາດພຣະບາດທັງສອງຂອງພຣະຜູ້ມີພຣະພາກເຈົ້າດ້ວຍຂະໜ່ອມ (ແລ້ວຂາບທູນ) ຕາມຄຳຂອງຂ້ານ້ອຍວ່າ ລະຂຸມາອຸປາສິກາ

ຖວາຍອະພິວາດ ພຣະບາດທັງສອງຂອງພຣະຜູ້ມີພຣະພາກເຈົ້າດ້ວຍຂະໜ່ອມ ຂ້ານ້ອຍ ຂ້າແດ່ທ່ານຜູ້ຈະເລີນ ການທີ່ພຣະຜູ້ມີພຣະພາກເຈົ້າ ຊົງພະຍາກອນຂ້ານ້ອຍວ່າ ຈະໄດ້ບັນລຸສາມັນຜົນຂັ້ນໃດຂັ້ນໜຶ່ງນັ້ນ ບໍ່ໜ້າອັດສະຈັນທໍ່ກັບທີ່ ຊົງພະຍາກອນເຮົາວ່າຈະໄດ້ບັນລຸສະກະທາຄາມີຜົນເລີຍ

**ລະຂຸນາວິມານທີ ໔ ຈົບ**

## ໖. ອາຈາມະຫາຍິກາວິມານ

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ຍິງກຳພ້າ

(ທ້າວສັກກະເທວະຣາດ ເມື່ອຈະຕັດຖາມພຣະມະຫາກັດສະປະເຖຣະເຖິງສະຖານທີ່ເກີດຂອງຍິງນັ້ນ ຈຶ່ງໄດ້ກ່າວຄາຖາເຫຼົ່ານີ້ວ່າ)

[໑໗໔] ເມື່ອພຣະຜູ້ເປັນເຈົ້າກຳລັງທ່ຽວບິນທະບາດ ຢຸດຢືນມິດຢູ່
ຍິງກຳພ້າຂັດສົນຄົນໜຶ່ງ ເຊິ່ງອາໄສຊາຍຄາເຮືອນຂອງຜູ້ອື່ນຢູ່

[໑໗໕] ນາງເຫຼື້ອມໃສ ໄດ້ຖວາຍເຂົ້າກົ້ນໝໍ້ແດ່
ພຣະຜູ້ເປັນເຈົ້າດ້ວຍມືທັງສອງຂອງຕົນ
ນາງລະຮ່າງມະນຸດແລ້ວ ໄດ້ໄປສະຫວັນຊັ້ນໃດນໍ

(ພຣະມະຫາກັດສະປະເຖຣະຖວາຍພຣະພອນວ່າ)

[໑໗໖] ເມື່ອອາດຕະມາກຳລັງທ່ຽວບິນທະບາດ ຢຸດຢືນມິດຢູ່
ຍິງກຳພ້າຂັດສົນຄົນໜຶ່ງ ເຊິ່ງອາໄສຊາຍຄາເຮືອນຂອງຜູ້ອື່ນຢູ່

[໑໗໗] ນາງເຫຼື້ອມໃສ ໄດ້ຖວາຍເຂົ້າກົ້ນໝໍ້ແກ່ອາດຕະມາດ້ວຍມືທັງສອງຂອງຕົນ
ນາງລະຮ່າງມະນຸດ ຈຸຕິພົ້ນຈາກມະນຸດສາໂລກນີ້ແລ້ວ

[໑໗໘] ນາງເປັນເທບທິດາຊື່ອາຈາມະຫາຍິກາ ມີຄວາມສຸກບັນເທີງຢູ່ໃນສະຫວັນ
ເຊິ່ງເປັນບ່ອນຢູ່ຂອງທວຍເທບຜູ້ມີລິດຫຼາຍຊື່ນິມມານະຣະດີ
(ທ້າວສັກກະເທວະຣາດຕັດສັນເສີນທານນັ້ນວ່າ)

[໑໘໐] ໜ້າອັດສະຈັນແທ້ນໍ
ທານທີ່ຍິງກຳພ້າຕັ້ງໄວ້ດີແລ້ວໃນພຣະຜູ້ເປັນເຈົ້າມະຫາກັດສະປະ
ທັກຂິນາສຳເລັດຜົນແລ້ວດ້ວຍວັດຖຸທານທີ່ໄດ້ມາຈາກຜູ້ອື່ນ

[໑໗໑] ຄວາມເປັນເອກອັກຄະຣະມະເຫສີຂອງພຣະເຈົ້າຈັກກະພັດ
ເຊິ່ງນາຣີຜູ້ງາມທົ່ວສັນພາງກາຍ
ສາມີແນມບໍ່ຮູ້ເບື່ອ ໄດ້ຄອບຄອງແລ້ວນັ້ນ
ຍັງມີຄ່າບໍ່ເຖິງສ້ຽວທີ ໑໖ ຂອງການຖວາຍເຂົ້າກົ້ນໜໍ້ນັ້ນ

[໑໗໘] ຄຳຮ້ອຍແທ່ງ ມ້າຮ້ອຍໂຕ ຣາດຊະລົດທຽມມ້າອັດສະດອນຮ້ອຍຄັນ
ຍິງສາວປະດັບຕຸ້ມຫູແກ້ວມະນີແສນນາງ
ກໍຍັງມີຄ່າບໍ່ເຖິງສ້ຽວທີ ໑໖ ຂອງການຖວາຍເຂົ້າກົ້ນໜໍ້ນັ້ນ

[໑໗໙] ຊ້າງມາຕັງຄະເກີດໃນປ່າຫິມະພານ ປະມານ ໑໐໐ ເຊືອກ
ມີງາງອນງາມ ຊົງພະລັງຫຼາຍ ມີສາຍຄ້ອງຄໍຄຳ
ຕົກແຕ່ງດ້ວຍເຄື່ອງປູລາດແລະເຄື່ອງປະດັບທີ່ວິຈິດບັນຈົງດ້ວຍຄຳ
ກໍຍັງມີຄ່າບໍ່ເຖິງສ້ຽວທີ ໑໖ ຂອງການຖວາຍເຂົ້າກົ້ນໜໍ້ນັ້ນ

[໑໘໔] ການທີ່ພຣະເຈົ້າຈັກກະພັດໄດ້ຄອບຄອງມະຫາທະວີບທັງສີ່ໃນໂລກນີ້ນັ້ນ
ກໍຍັງມີຄ່າບໍ່ເຖິງສ້ຽວທີ ໑໖ ຂອງການຖວາຍເຂົ້າກົ້ນໜໍ້ນັ້ນ

ອາຈາມະຫາຍິກາວິມານທີ ໓ ຈົບ

# ໔. ຈັນທາລີວິມານ

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ຍິງຈັນທານຜູ້ເຫຼື້ອມໃສໃນພຣະພຸດທະເຈົ້າ

(ພຣະມະຫາໂມກຄັນລານະເຖຣະກ່າວ ໔ ຄາຖາວ່າ)

[໑໘໕] ຈັນທາລີ ທ່ານຈົ່ງຖວາຍອະພິວາດພຣະບາດທັງສອງ
ຂອງພຣະໂຄດົມສຳມາສຳພຸດທະເຈົ້າຜູ້ມີພຣະຍົດ
ພຣະອົງຜູ້ສູງສຸດກວ່າລືສີທັງຫຼາຍ
ໄດ້ປະທັບຢືນຢູ່ເພື່ອອະນຸເຄາະທ່ານຜູ້ດຽວທີ່ນັ້ນ

[໑໘໖] ທ່ານຈົ່ງເຮັດໃຈໃຫ້ເຫຼື້ອມໃສຍິ່ງໃນພຣະພຸດທະອົງ
ເຊິ່ງເປັນພຣະອະຣະຫັນຜູ້ໝັ້ນຄົງ
ແລ້ວຈົ່ງປະຄອງອັນຊະລີຖວາຍອະພິວາດໂດຍໄວ ຊີວິດທ່ານເຫຼືອໜ້ອຍແລ້ວ

(ເພື່ອຈະສະແດງປະຫວັດຂອງນາງຈັນທາລີນັ້ນໂດຍຕະຫຼອດ ພຣະສັງຄີຕິກາຈານທັງຫຼາຍ ຈຶ່ງກ່າວ ໔ ຄາຖາວ່າ)

[໑໙໗] ຍິງຈັນທານຜູ້ນີ້ຄອງເຮືອນຮ່າງເປັນມື້ສຸດທ້າຍ
ເຊິ່ງພຣະມະຫາໂມກຄັນລານະເຖຣະຜູ້ອົບຮົມຕົນແລ້ວ ຕັກເຕືອນແລ້ວ
ໄດ້ຖວາຍອະພິວາດພຣະບາດທັງສອງຂອງພຣະໂຄດົມສຳມາສຳພຸດທະເຈົ້າ

[໑໙໘] ງົວແມ່ໄດ້ຂວິດນາງຕາຍ ຂະນະຍືນປະຄອງອັນຊະລີ
ນະມັດສະການພຣະສຳມາສຳພຸດທະເຈົ້າຜູ້ສ່ອງແສງສະຫວ່າງໃນໂລກມືດ

(ນາງໄປເກີດເປັນເທບທິດາຢູ່ໃນສະຫວັນຊັ້ນຕາວະຕິງສາ ມື້ນັ້ນ ນາງໄດ້ມາຫາພຣະມະຫາໂມກຄັນລານະເຖຣະ ນະມັດສະການແລ້ວຂາບຮຽນວ່າ)

[໑໙໙] ຂ້າແດ່ທ່ານຜູ້ແກ່ກ້າ ຂ້ານ້ອຍບັນລຸເທວະລິດແລ້ວ
ຂໍເຂົ້ານະມັດສະການໃກ້ ໆ ທ່ານຜູ້ມີອານຸພາບຫຼາຍ ຜູ້ສິ້ນອາສະວະ
ປາສະຈາກກິເລດເໝືອນທຸລີ ບໍ່ຫວັ່ນໄຫວ
ນັ່ງລີ້ຢູ່ໃນປ່າແຕ່ພຽງຜູ້ດຽວ

(ພຣະມະຫາໂມກຄັນລານະເຖຣະຈຶ່ງຖາມນາງວ່າ)

[໘໐໐] ເທບທິດາຜູ້ເລີໂສມ ທ່ານເປັນໃຜ ມີຜິວພັນງາມດັ່ງຄຳ
ມີຣັດສະໝີເຮືອງຮອງ ມີຍົດຫຼາຍ ງາມຕະການບໍ່ແມ່ນໜ້ອຍ
ມີໝູ່ເທບອັບປະສອນຫ້ອມລ້ອມລົງຈາກວິມານມາໄຫວ້ອາດຕະມາ
(ເທບທິດານັ້ນຖືກພຣະມະຫາເຖຣະຖາມແລ້ວແນວນີ້ຈຶ່ງກ່າວ ໔ ຄາຖາວ່າ)

[໘໐໑] ຂ້າແດ່ທ່ານຜູ້ຈະເລີນ ຂ້ານ້ອຍຄືຍິງຈັນທານ
ເຊິ່ງທ່ານຜູ້ແກ່ກ້າໃຫ້ໄປຖວາຍອະພິວາດພຣະບາດທັງສອງ
ຂອງພຣະໂຄດົມອະຣະຫັນຕະສຳມາສຳພຸດທະເຈົ້າ ຜູ້ມີພຣະຍົດ

[໘໐໒] ເມື່ອຖວາຍອະພິວາດພຣະບາດທັງສອງແລ້ວ
ຂ້ານ້ອຍໄດ້ຈຸຕິຈາກກຳເນີດຄົນຈັນທານ
ມາບັງເກີດໃນວິມານເຊິ່ງຈະເລີນພ້ອມມູນໃນສວນນັນທະວັນ

[໘໐໓] ນາງເທບອັບປະສອນຫຼາຍພັນນາງ ພາກັນຫ້ອມລ້ອມຂ້ານ້ອຍຢູ່
ຂ້ານ້ອຍເປັນຜູ້ປະເສີດເລີດກວ່າເທບອັບປະສອນເຫຼົ່ານັ້ນ

ໂດຍຣັດສະໝີ ບໍລິວານຍົດແລະອາຍຸ

[໔໐໔] ຂ້າແດ່ ພຣະຜູ້ເປັນເຈົ້າຜູ້ຈະເລີນ ຂ້ານ້ອຍມີສະຕິສຳປະຊັນຍະ
ສ້າງຄຸນງາມຄວາມດີໄວ້ຫຼາຍ
ມາໃນໂລກ(ນີ້)ເພື່ອນະມັດສະການພຣະຜູ້ເປັນເຈົ້າຜູ້ເປັນມຸນີ ມີຄວາມກະລຸນາ

(ພຣະສັງຄີຕິກາຈານກ່າວວ່າ)

[໔໐໕] ເທບທິດາຈັນທາລີຜູ້ກະຕັນຍູກະຕະເວທີ ເມື່ອຂາບຮຽນແນວນີ້ແລ້ວ
ຈຶ່ງຂາບລົງແທບຕີນພຣະມະຫາໂມກຄັນລານະ
ຜູ້ອະຣະຫັນແລ້ວຫາຍໄປ ໃນບ່ອນນັ້ນເອງ

**ຈັນທາລີວິມານທີ ໔ ຈົບ**

## ໕. ພັດທິດຖິກາວິມານ
## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ນາງພັດທິດຖິກາອຸປາສິກາ

(ພຣະຜູ້ມີພຣະພາກເຈົ້າ ຕັດຖາມເຖິງບຸບພະກັມທີ່ນາງພັດທາເທບທິດານັ້ນ ໄດ້ເຮັດໄວ້ວ່າ)

[໔໐໖-໔໐໗] ເທບທິດາຜູ້ຊົງປັນຍາ ທ່ານປະດັບມາໄລດອກມົນທາຣົບ
ເຊິ່ງມີສີຕ່າງ ໆ ໄວ້ທີ່ຫົວ ຄື ສີຂຽວ ເຫຼືອງ ດຳ ທົງສະບາດແລະແດງ
ຮອບລ້ອມດ້ວຍກີບເກສອນ ໃນເທບໝູ່ອື່ນບໍ່ມີຕົ້ນໄມ້ຊະນິດນີ້

[໔໐໘] ເທບທິດາຜູ້ມີບໍລິວານຍົດ
ຍ້ອນບຸນອັນໃດທ່ານຈຶ່ງໄດ້ເກີດໃນໝູ່ເທບຊັ້ນໄຕຣທົດ
ຕະຖາຄົດຖາມທ່ານແລ້ວ ຈົ່ງບອກເທີ້ນວ່າ ນີ້ເປັນຜົນຂອງກຳອັນໃດນໍ

(ເທບທິດາຖືກພຣະຜູ້ມີພຣະພາກເຈົ້າ ຕັດຖາມແນວນີ້ແລ້ວ ຈຶ່ງທູນຕອບດ້ວຍຄາຖາເຫຼົ່ານີ້ຄວາມວ່າ)

[໔໐໙] ຄົນທັງຫຼາຍຮູ້ຈັກຂ້າພຣະອົງໃນນາມວ່າ ພັດທິດຖິກາ
ຂ້າພຣະອົງເປັນອຸປາສິກາຢູ່ໃນກິມພິລະນະຄອນ
ເປັນຜູ້ມີສັດທາແລະສົມບູນດ້ວຍສີນ ຍິນດີແຈກຈ່າຍທານທຸກເມື່ອ

[໔໑໐] ຂ້າພຣະອົງມີໃຈເຫຼື້ອມໃສໃນພຣະອະຣິຍະເຈົ້າຜູ້ປະຕິບັດກົງ
ຈຶ່ງໄດ້ຖວາຍເຄື່ອງນຸ່ງຫົ່ມ ອາຫານ ເສນາສະນະແລະເຄື່ອງເຍືອງໄຟ

[໔໑໑] ຂ້າພຣະອົງເຂົ້າຈຳອຸໂປສົດສິນເຊິ່ງປະກອບດ້ວຍອົງ ໘
ທຸກມື້ ໑໔ ຄ່ຳ ໑໕ ຄ່ຳແລະ ໘ ຄ່ຳແຫ່ງປັກ
ແລະຕະຫຼອດປາຕິຫາຣິຍະປັກ

[໔໑໒] ຂ້າພຣະອົງສັງລວມລະວັງໃນສິນຕະຫຼອດເວລາ
ແລະແຈກຈ່າຍທານດ້ວຍຄວາມເຄົາລົບຈຶ່ງໄດ້ຄອບຄອງວິມານນີ້

[໔໑໓] ຂ້າພຣະອົງງົດເວັ້ນຈາກການຂ້າສັດ ເວັ້ນໄກຈາກການລັກຂະໂມຍ
ການປະພຶດນອກໃຈສາມີ ສັງລວມລະວັງຈາກການເວົ້າຕົວະ
ແລະການດື່ມນ້ຳເມົາ

[໔໑໔] ຂ້າພຣະອົງຍິນດີໃນສິນ ໕ ສະຫຼາດໃນອະຣິຍະສັດ
ມີປົກກະຕິຢູ່ດ້ວຍຄວາມບໍ່ຜະໝາດ
ເປັນອຸປາສິກາຂອງພຣະຜູ້ມີພຣະພາກເຈົ້າຊົງພຣະນາມວ່າ
ໂຄດົມ ຜູ້ຊົງມີພຣະຈັກຂຸ
ຂ້າພຣະອົງໄດ້ພ່ຳເພັງສຸດຈະຣິດທຳແລະໄດ້ພ່ຳເພັງກຸສົນທຳໄວ້ແລ້ວ
ຈຸຕິຈາກມະນຸດສາໂລກນັ້ນແລ້ວ ໄດ້ເກີດເປັນເທບທິດາມີຣັດສະໝີໃນໂຕເອງ
ທ່ຽວຊົມສວນນັນທະວັນຢູ່

[໔໑໕] ອັນໜຶ່ງ ຂ້າພຣະອົງໄດ້ຖວາຍອາຫານແກ່ພິກຂຸ
ຜູ້ອະນຸເຄາະເກື້ອກູນຢ່າງເຫຼືອລົ້ນ
ຜູ້ເປັນຄູ່ດາບົດມະຫາມຸນີ
ໄດ້ພ່ຳເພັງສຸດຈະຣິດທຳແລະໄດ້ພ່ຳເພັງກຸສົນທຳໄວ້ແລ້ວ
ຈຸຕິຈາກມະນຸດສາໂລກນັ້ນ ເກີດເປັນເທບທິດາ
ມີຣັດສະໝີໃນໂຕເອງ ທ່ຽວຊົມສວນນັນທະວັນຢູ່

[໔໑໖] ຂ້າພຣະອົງເຂົ້າຈຳອຸໂປສົດສິນ ປະກອບດ້ວຍອົງ ໘
ມີຄຸນກຳນົດບໍ່ໄດ້ ນຳຄວາມສຸກມາໃຫ້ເນືອງນິດ
ໄດ້ພ່ຳເພັງສຸດຈະຣິດທຳແລະໄດ້ພ່ຳເພັງກຸສົນທຳແລ້ວ
ຈຸຕິຈາກມະນຸດສາໂລກນັ້ນແລ້ວ ໄດ້ເກີດເປັນເທບທິດາ
ມີຣັດສະໝີໃນໂຕເອງ ທ່ຽວຊົມສວນນັນທະວັນຢູ່

**ພັດທິດຖິກາວິມານທີ ໕ ຈົບ**

# ໖. ໂສນະທິນນາວິມານ

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ນາງໂສນະທິນນາອຸປາສິກາ

(ພຣະມະຫາໂມກຄັນລານະເຖຣະຖາມເທບທິດານັ້ນດ້ວຍຄາຖາເຫຼົ່ານີ້ວ່າ)

[໔໑໗] ເທບທິດາ ທ່ານມີຜິວພັນງາມຍິ່ງ
ເປ່ງຣັດສະໝີສະຫວ່າງສະໄຫວໄປທົ່ວທຸກທິດຢູ່ ຄືດາວປະກາຍພຶກ

[໔໑໘] ຍ້ອນບຸນອັນໃດຜິວພັນທ່ານຈຶ່ງງາມແນວນີ້
ຜົນອັນເພິ່ງປາຖະໜາຈຶ່ງສຳເລັດແກ່ທ່ານໃນວິມານນີ້
ແລະໂພຄະທັງມວນລ້ວນໜ້າພໍໃຈຈຶ່ງເກີດຂຶ້ນແກ່ທ່ານ

[໔໑໙] ເທບທິດາຜູ້ມີອານຸພາບຫຼາຍ ອາດຕະມາຂໍຖາມວ່າ
ເມື່ອທ່ານເກີດເປັນມະນຸດໄດ້ເຮັດບຸນອັນໃດໄວ້
ຍ້ອນບຸນອັນໃດ ທ່ານຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

[໔໒໐] ເທບທິດານັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ
ຈຶ່ງຕອບບັນຫາຜົນກຳໄປຕາມທີ່ພຣະເຖຣະຖາມວ່າ

[໔໒໑] ຊາວເມືອງນາລັນທາຮູ້ຈັກຂ້ານ້ອຍໃນນາມວ່າ ໂສນະທິນນາ
ຂ້ານ້ອຍເປັນອຸປາສິກາຢູ່ໃນເມືອງນາລັນທາ
ເປັນຜູ້ມີສັດທາ ສົມບູນດ້ວຍສິນ ຍິນດີແຈກຈ່າຍທານທຸກເມື່ອ

[໔໒໒] ຂ້ານ້ອຍມີໃຈເຫຼື້ອມໃສໃນພຣະອະຣິຍະເຈົ້າຜູ້ປະຕິບັດກົງ
ຈຶ່ງໄດ້ຖວາຍເຄື່ອງນຸ່ງຫົ່ມ ອາຫານ ເສນາສະນະແລະເຄື່ອງເຍືອງໄຟ

[໔໒໓] ຂ້ານ້ອຍເຂົ້າຈຳອຸໂປສົດສິນ ເຊິ່ງປະກອບດ້ວຍອົງ ໘
ທຸກມື້ ໑໔ ຄ່ຳ ໑໕ ຄ່ຳແລະ ໘ ຄ່ຳແຫ່ງປັກ
ແລະຕະຫຼອດປາຕິຫາຣິຍະປັກ

[໔໒໔] ຂ້ານ້ອຍສັງລວມລະວັງໃນສິນຕະຫຼອດເວລາ
ແລະແຈກຈ່າຍທານດ້ວຍຄວາມເຄົາລົບຈຶ່ງໄດ້ຄອບຄອງວິມານນີ້

[໔໒໕] ຂ້ານ້ອຍງົດເວັ້ນຈາກການຂ້າສັດ ເວັ້ນໄກຈາກການລັກຂະໂມຍ

ການປະພຶດນອກໃຈສາມີ ສັງລວມລະວັງຈາກການເວົ້າຕົວະ
ແລະການດື່ມນ້ຳເມົາ

[໔໔໖] ຂ້ານ້ອຍຍິນດີໃນສິນ ໕ ສະຫຼາດໃນອະຣິຍະສັດ
ເປັນອຸປາສິກາຂອງພຣະຜູ້ມີພຣະພາກເຈົ້າຊົງພຣະນາມວ່າ ໂຄດົມ
ຜູ້ມີພຣະຈັກຂຸ ມີພຣະຍົດ

[໔໔໗-໔໔໘] ຍ້ອນບຸນນັ້ນຜິວພັນຂ້ານ້ອຍຈຶ່ງງາມແນວນີ້ ໆລໆ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

**ໂສນະທິນນາວິມານທີ ໖ ຈົບ**

# ກ. ອຸໂປສະຖາວິມານ

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ນາງອຸໂປສະຖາອຸປາສິກາ

(ພຣະມະຫາໂມກຄັນລານະເຖຣະຖາມເຖິງບຸບພະກຳຂອງເທບທິດານັ້ນວ່າ)

[໔໔໙] ເທບທິດາ ທ່ານມີຜິວພັນງາມຍິ່ງ
ເປ່ງຣັດສະໝີສະຫວ່າງສະໄຫວໄປທົ່ວທຸກທິດຢູ່ ຄືດາວປະກາຍພຶກ

[໔໓໐-໔໓໑] ຍ້ອນບຸນອັນໃດຜິວພັນທ່ານຈຶ່ງງາມແນວນີ້ ໆລໆ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

[໔໓໔] ເທບທິດານັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ
ຈຶ່ງຕອບບັນຫາຜົນກຳໄປຕາມທີ່ພຣະເຖຣະຖາມວ່າ

[໔໓໓] ຊາວເມືອງສາເກດຮູ້ຈັກຂ້ານ້ອຍໃນນາມວ່າ ອຸໂປສະຖາ
ຂ້ານ້ອຍເປັນອຸປາສິກາຢູ່ໃນເມືອງສາເກດ
ເປັນຜູ້ມີສັດທາ ສົມບູນດ້ວຍສິນ ແລະຍິນດີແຈກຈ່າຍທານທຸກເມື່ອ

[໔໓໔] ຂ້ານ້ອຍມີໃຈເຫຼື້ອມໃສໃນພຣະອະຣິຍະເຈົ້າຜູ້ປະຕິບັດກົງ
ຈຶ່ງໄດ້ຖວາຍເຄື່ອງນຸ່ງຫົ່ມ ອາຫານ ເສນາສະນະແລະເຄື່ອງເຍືອງໄຟ

[໔໓໕] ຂ້ານ້ອຍເຂົ້າຈຳອຸໂປສົດສິນ ເຊິ່ງປະກອບດ້ວຍອົງ ໘
ທຸກມື້ ໑໔ ຄ່ຳ ໑໕ ຄ່ຳແລະ ໘ ຄ່ຳແຫ່ງປັກ

ແລະຕະຫຼອດປາຕິຫາຣິຍະປັກ

[໔໓໖] ຂ້ານ້ອຍສັງລວມລະວັງໃນສິນຕະຫຼອດເວລາ ແລະແຈກຈ່າຍທານດ້ວຍຄວາມເຄົາລົບຈຶ່ງໄດ້ຄອບຄອງວິມານນີ້

[໔໓໗] ຂ້ານ້ອຍງົດເວັ້ນຈາກການຂ້າສັດ ເວັ້ນໄກຈາກການລັກຂະໂມຍ ການປະພຶດນອກໃຈສາມີ ສັງລວມລະວັງຈາກການເວົ້າຕົວະ ແລະການດື່ມນ້ຳເມົາ

[໔໓໘] ຂ້ານ້ອຍຍິນດີໃນສິນ ໕ ສະຫຼາດໃນອະຣິຍະສັດ ເປັນອຸປາສິກາຂອງພຣະຜູ້ມີພຣະພາກເຈົ້າຊົງພຣະນາມວ່າ ໂຄດົມ ຜູ້ມີພຣະຈັກຂຸ ມີພຣະຍົດ

[໔໓໙-໔໔໐] ຍ້ອນບຸນນັ້ນຜິວພັນຂ້ານ້ອຍຈຶ່ງງາມແນວນີ້ ຯລຯ ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

(ເມື່ອຈະສະແດງໂທດຂອງຕົນ ເທບທິດານັ້ນຈຶ່ງໄດ້ກ່າວ ໔ ຄາຖາອີກວ່າ)

[໔໔໑] ຍ້ອນຂ້ານ້ອຍໄດ້ຟັງເລື້ອງທິບພະຍະສົມບັດໃນສວນນັນທະວັນເນືອງ ໆ ຈຶ່ງເກີດຄວາມພໍໃຈຂຶ້ນ
ຍ້ອນເຫດທີ່ຂ້ານ້ອຍຕັ້ງຈິດປາຖະໜາໃນພົບຕາວະຕຶງສານັ້ນ
ຈຶ່ງໄດ້ເກີດໃນສວນນັນທະວັນ

[໔໔໔] ຂ້ານ້ອຍບໍ່ໄດ້ປະຕິບັດຕາມພຣະດຳຣັດ
ຂອງພຣະບໍຣົມມະສາດສະດາສຳມາສຳພຸດທະເຈົ້າ
ຜູ້ເປັນເຜົ່າພັນພຣະອາທິດ (ແຕ່)
ຕັ້ງຈິດໄວ້ໃນພົບທີ່ຊົ່ວ ພາຍຫຼັງຈຶ່ງເດືອດຮ້ອນ

(ເພື່ອຈະປອບໃຈເທບທິດານັ້ນ ພຣະມະຫາໂມກຄັນລານະເຖຣະຈຶ່ງໄດ້ກ່າວຄາຖານີ້ວ່າ)

[໔໔໓] ອຸໂປສະຖາເທບທິດາ ທ່ານຈະຢູ່ໃນວິມານນີ້ດົນທໍ່ໃດ ອາດຕະມາຖາມແລ້ວ ຖ້າທ່ານຮູ້ອາຍຸໄຂ ຈົ່ງບອກອາດຕະມາດ້ວຍເທີ້ນ

**(ເທບທິດານັ້ນຕອບວ່າ)**

[໔໔໔] ຂ້າແດ່ ທ່ານຈອມປາດ ຂ້ານ້ອຍຈັກດຳລົງຢູ່

ໃນວິມານນີ້ດົນປະມານທິກໝື່ນປີທິບ
ຈຸຕິຈາກເທວະໂລກນີ້ແລ້ວ ຈັກໄປເກີດຮ່ວມກັບມວນມະນຸດ

(ພຣະມະຫາໂມກຄັນລານະເຖຣະສຸກຍູ້ເທບທິດານັ້ນໃຫ້ອາດຫານດ້ວຍຄາຖານີ້ວ່າ)

[໔໔໕] ອຸໂປສະຖາເທບທິດາ ທ່ານຢ່າສະທົກສະທ້ານ
ຍ້ອນວ່າທ່ານເປັນຜູ້ທີ່ພຣະສຳມາສຳພຸດທະເຈົ້າຊົງພະຍາກອນໄວ້ແລ້ວວ່າ
ຈັກບັນລຸຄຸນວິເສດເປັນພຣະໂສດາບັນ ທຸກຄະຕິເປັນອັນທ່ານລະໄດ້ແລ້ວ

**ອຸໂປສະຖາວິມານທີ ໗ ຈົບ**

## ໘. ສຸນິດທາວິມານ

### ວ່າດ້ວຍວິມານທີ່ເກີດຂຶ້ນແກ່ນາງສຸນິດທາອຸປາສິກາ

(ພຣະມະຫາໂມກຄັນລານະເຖຣະ ເມື່ອຈະຖາມເຖິງບຸບພະກຳຂອງເທບທິດານັ້ນ ຈຶ່ງກ່າວຄາຖານີ້ວ່າ)

[໔໔໖] ເທບທິດາ ທ່ານມີຜິວພັນງາມຍິ່ງ
ເປ່ງຣັດສະໝີສະຫວ່າງສະໄຫວໄປທົ່ວທຸກທິດຢູ່ ຄືດາວປະກາຍພຶກ

[໔໔໗-໔໔໘] ຍ້ອນບຸນອັນໃດຜິວພັນທ່ານຈຶ່ງງາມແບບນີ້ ໆລໆ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແບບນີ້

[໔໔໙] ເທບທິດານັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ
ຈຶ່ງຕອບບັນຫາຜົນກຳໄປຕາມທີ່ພຣະເຖຣະຖາມວ່າ

[໔໕໐] ຊາວເມືອງຣາດຊະຄຶຮູ້ຈັກຂ້ານ້ອຍໃນນາມວ່າ ສຸນິດທາ
ຂ້ານ້ອຍເປັນອຸປາສິກາຢູ່ໃນນະຄອນຣາດຊະຄຶ
ເປັນຜູ້ມີສັດທາ ສົມບູນດ້ວຍສິນ ແລະຍິນດີແຈກຈ່າຍທານທຸກເມື່ອ

[໔໕໑] ຂ້ານ້ອຍມີໃຈເຫຼື້ອມໃສໃນພຣະອະຣິຍະເຈົ້າຜູ້ປະຕິບັດກົງ
ຈຶ່ງໄດ້ຖວາຍເຄື່ອງນຸ່ງຫົ່ມ ອາຫານ ເສນາສະນະ ແລະເຄື່ອງເຍືອງໄຟ

[໔໕໔] ຂ້ານ້ອຍເຂົ້າຈຳອຸໂປສົດສິນ ເຊິ່ງປະກອບດ້ວຍອົງ ໘
ທຸກມື້ ໑໔ ຄ່ຳ ໑໕ ຄ່ຳແລະ ໘ ຄ່ຳແຫ່ງປັກ

ແລະຕະຫຼອດປາຕິຫາຣິຍະປັກ

[໘໕໓] ຂ້ານ້ອຍສັງລວມລະວັງໃນສິນຕະຫຼອດເວລາ ແລະແຈກຈ່າຍທານດ້ວຍຄວາມເຄົາລົບຈຶ່ງໄດ້ຄອບຄອງວິມານນີ້

[໘໕໔] ຂ້ານ້ອຍງົດເວັ້ນຈາກການຂ້າສັດ ເວັ້ນໄກຈາກການລັກຂະໂມຍ ການປະພຶດນອກໃຈສາມີ ສັງລວມລະວັງຈາກການເວົ້າຕົວະ ແລະການດື່ມນໍ້າເມົາ

[໘໕໕] ຂ້ານ້ອຍຍິນດີໃນສິນ ໕ ສະຫຼາດໃນອະຣິຍະສັດ ເປັນອຸປາສິກາຂອງພຣະຜູ້ມີພຣະພາກເຈົ້າຊົງພຣະນາມວ່າ ໂຄຕົມ ຜູ້ມີພຣະຈັກຂຸ ມີພຣະຍົດ

[໘໕໖-໘໕໗] ຍ້ອນບຸນນັ້ນຜິວພັນຂ້ານ້ອຍຈຶ່ງງາມແນວນີ້ ຯລຯ ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

**ສຸນິດທາວິມານທີ ໗ ຈົບ**

## ໘. ສຸທິນນາວິມານ

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ນາງສຸທິນນາອຸປາສິກາ

(ພຣະມະຫາໂມກຄັນລານະເຖຣະ ເມື່ອຈະຖາມເຖິງບຸບພະກໍາຂອງເທບທິດານັ້ນ ຈຶ່ງກ່າວຄາຖານີ້ວ່າ)

[໘໕໘] ເທບທິດາ ທ່ານມີຜິວພັນງາມຍິ່ງ ເປ່ງຣັດສະໝີສະຫວ່າງສະໄຫວໄປທົ່ວທຸກທິດສະຖິດຢູ່ ຄືດາວປະກາຍພຶກ

[໘໕໙-໘໖໐] ຍ້ອນບຸນອັນໃດຜິວພັນທ່ານຈຶ່ງງາມແນວນີ້ ຯລຯ ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

[໘໖໑] ເທບທິດານັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ ຈຶ່ງຕອບບັນຫາຜົນກໍາໄປຕາມທີ່ພຣະເຖຣະຖາມວ່າ

[໘໖໒] ຊາວນະຄອນຣາດຊະຄຶຮູ້ຈັກຂ້ານ້ອຍໃນນາມວ່າ ສຸທິນນາ ຂ້ານ້ອຍເປັນອຸປາສິກາຢູ່ໃນນະຄອນຣາດຊະຄຶ

ເປັນຜູ້ມີສັດທາ ສົມບູນດ້ວຍສິນ
ແລະຍິນດີແຈກຈ່າຍທານທຸກເມື່ອ

[໘໗໓] ຂ້ານ້ອຍມີໃຈເຫຼື້ອມໃສໃນພຣະອະຣິຍະເຈົ້າຜູ້ປະຕິບັດກົງ
ຈຶ່ງໄດ້ຖວາຍເຄື່ອງນຸ່ງຫົ່ມ ອາຫານ ເສນາສະນະ ແລະເຄື່ອງເຍືອງໄຟ

[໘໗໔] ຂ້ານ້ອຍເຂົ້າຈຳອຸໂປສົດສິນເຊິ່ງປະກອບດ້ວຍອົງ ໘
ທຸກມື້ ໑໔ ຄ່ຳ ໑໕ ຄ່ຳແລະ ໘ ຄ່ຳແຫ່ງປັກ
ແລະຕະຫຼອດປາຕິຫາຣິຍະປັກ

[໘໗໕] ຂ້ານ້ອຍສັງລວມລະວັງໃນສິນຕະຫຼອດເວລາ
ແລະແຈກຈ່າຍທານດ້ວຍຄວາມເຄົາລົບ
ຈຶ່ງໄດ້ຄອບຄອງວິມານນີ້

[໘໗໖] ຂ້ານ້ອຍງົດເວັ້ນຈາກການຂ້າສັດ ເວັ້ນໄກຈາກການລັກຂະໂມຍ
ການປະພຶດນອກໃຈສາມີ ສັງລວມລະວັງຈາກການເວົ້າຕົວະ
ແລະການດື່ມນ້ຳເມົາ

[໘໗໗] ຂ້ານ້ອຍຍິນດີໃນສິນ ໕ ສະຫຼາດໃນອະຣິຍະສັດ
ເປັນອຸປາສິກາຂອງພຣະຜູ້ມີພຣະພາກເຈົ້າຊົງພຣະນາມວ່າ ໂຄດົມ
ຜູ້ມີພຣະຈັກຂຸ ມີພຣະຍົດ

[໘໗໘-໘໗໙] ຍ້ອນບຸນນັ້ນຜິວພັນຂ້ານ້ອຍຈຶ່ງງາມແນວນີ້ ฯລฯ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

**ສຸທິນນາວິມານທີ ໙ ຈົບ**

## ໑໐. ປະຖົມພິກຂາທາຍິກາວິມານ

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ຍິງຜູ້ຖວາຍພິກສາ ເລື້ອງທີ ໑

(ພຣະມະຫາໂມກຄັນລານະເຖຣະຖາມເທບທິດານັ້ນດ້ວຍຄາຖາເຫຼົ່ານີ້ວ່າ)

[໘໘໐] ເທບທິດາ ທ່ານມີຜິວພັນງາມຍິ່ງ
ເປ່ງຣັດສະໝີສະຫວ່າງສະໄຫວໄປທົ່ວທຸກທິດຢູ່ ຄືດາວປະກາຍພຶກ

[໔໗໑-໔໗໒] ຍ້ອນບຸນອັນໃດຜິວພັນທ່ານຈຶ່ງງາມແບບນີ້ ຯລຯ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແບບນີ້

[໔໗໓] ເທບທິດານັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ
ຈຶ່ງຕອບບັນຫາຜົນກຳໄປຕາມທີ່ພຣະເຖຣະຖາມວ່າ

[໔໗໔] ຊາດກ່ອນຂ້ານ້ອຍເກີດເປັນມະນຸດຢູ່ໃນໝູ່ມະນຸດໃນມະນຸດສາໂລກ

[໔໗໕] ໄດ້ເຫັນພຣະພຸດທະເຈົ້າຜູ້ປາສະຈາກກິເລດເໝືອນທຸລີ
ມີພຣະທະໄທຜ່ອງໃສ ບໍ່ມົວໝອງ ມີຄວາມເຫຼື້ອມໃສ
ໄດ້ຖວາຍພິກສາແດ່ພຣະອົງດ້ວຍມືທັງສອງຂອງຕົນ

[໔໗໖-໔໗໗] ຍ້ອນບຸນນັ້ນຜິວພັນຂ້ານ້ອຍຈຶ່ງງາມແບບນີ້ ຯລຯ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແບບນີ້

**ປະຖົມພິກຂາທາຍິກາວິມານທີ ໑໐ ຈົບ**

# ໑໑. ທຸຕິຍະພິກຂາທາຍິກາວິມານ

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ຍິງຜູ້ຖວາຍພິກສາ ເລື້ອງທີ ໒

(ພຣະມະຫາໂມກຄັນລານະເຖຣະຖາມເທບທິດານັ້ນດ້ວຍຄາຖາເຫຼົ່ານີ້ວ່າ)

[໔໗໘] ເທບທິດາ ທ່ານມີຜິວພັນງາມຍິ່ງ
ເປ່ງຣັດສະໝີສະຫວ່າງສະໄຫວໄປທົ່ວທຸກທິດຢູ່ ຄືດາວປະກາຍພຶກ

[໔໗໙-໔໘໐] ຍ້ອນບຸນອັນໃດຜິວພັນທ່ານຈຶ່ງງາມແບບນີ້ ຯລຯ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແບບນີ້

[໔໘໑] ເທບທິດານັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ
ຈຶ່ງຕອບບັນຫາຂອງຜົນກຳໄປຕາມທີ່ພຣະເຖຣະຖາມວ່າ

[໔໘໒] ຊາດກ່ອນ ຂ້ານ້ອຍເກີດເປັນມະນຸດຢູ່ໃນໝູ່ມະນຸດໃນມະນຸດສາໂລກ

[໔໘໓] ໄດ້ເຫັນພຣະພຸດທະເຈົ້າຜູ້ປາສະຈາກກິເລດເໝືອນທຸລີ
ມີພຣະທະໄທຜ່ອງໃສ ບໍ່ມົວໝອງ ມີຄວາມເຫຼື້ອມໃສ

ໄດ້ຖວາຍພິກສາແດ່ພຣະອົງດ້ວຍມືທັງສອງຂອງຕົນ

[໘໙໔-໘໙໕] ຍ້ອນບຸນນັ້ນຜືວພັນຂ້ານ້ອຍຈຶ່ງງາມແບວນີ້ ຯລຯ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

**ທຸຕິຍະພິກຂາທາຍິກາວິມານທີ ໑໑ ຈົບ**

## ລວມເລື້ອງວິມານທີ່ມີໃນວັກນີ້ ຄື

໑. ທາສີວິມານ
໒. ອາຈາມະທາຍິກາວິມານ
໓. ພັດທິດຖິກາວິມານ
໔. ອຸໂປສະຖາວິມານ
໕. ສຸທິນນາວິມານ
໖. ລະຂຸມາວິມານ
໗. ຈັນທາລີວິມານ
໘. ໂສນະທິນນາວິມານ
໙. ສຸນິດທາວິມານ
໑໐. ປະຖົມພິກຂາທາຍິກາວິມານ
໑໑. ທຸຕິຍະພິກຂາທາຍິກາວິມານ

**ຈິດຕະລະຕາວັກທີ ໘ ຈົບ**

**ປະຖົມພານະວາຣະ ຈົບ**

# ໓. ປາຣິດສັດຕະກະວັກ

## ໝວດວ່າດ້ວຍດອກປາຣິຊາດ

## ໑. ອຸລາຣະວິມານ

## ວ່າດ້ວຍວິມານອັນໂອລານ

(ພຣະມະຫາໂມກຄັນລານະເຖຣະຖາມເທບທິດານັ້ນດ້ວຍຄາຖາເຫຼົ່ານີ້ວ່າ)

[໘໗໓] ທ່ານມີບໍລິວານຍົດອັນຍິ່ງໃຫຍ່ ຜິວພັນເຮືອງຮອງ
ສ່ອງສະຫວ່າງໄປທົ່ວທຸກທິດ ເຫຼົ່າເທບນາຣີແລະເຫຼົ່າເທບພະບຸດ
ແຕ່ງອົງຊົງເຄື່ອງພາກັນຟ້ອນລຳຂັບຮ້ອງຢູ່

[໘໗໔] ໃຫ້ຄວາມບັນເທີງໃຈ ຫ້ອມລ້ອມຫວັງປົບເປີທ່ານຢູ່
ເທບທິດາຜູ້ມີໂສມຊວນພິດ ວິມານເຫຼົ່ານີ້ຂອງທ່ານລ້ວນເປັນວິມານຄຳ

[໘໗໕] ທັງທ່ານກໍເປັນໃຫຍ່ກວ່າເທບເຫຼົ່ານັ້ນ ປາຖະໜາທຸກສິ່ງກໍສຳເລັດສິ້ນ
ທ່ານເກີດມາດີ ມີອານຸພາບຍິ່ງໃຫຍ່ ແຈ່ມໃສບັນເທີງໃຈຢູ່ໃນໝູ່ເທບ
ເທບທິດາ ອາດຕະມາຖາມແລ້ວ ຂໍທ່ານຈົ່ງບອກເທີ້ນວ່າ
ນີ້ເປັນຜົນຂອງກຳອັນໃດນໍ

(ເທບທິດາຕອບວ່າ)

[໘໗໙] ຊາດກ່ອນຂ້ານ້ອຍເກີດເປັນມະນຸດຢູ່ໃນໝູ່ມະນຸດໃນມະນຸດສາໂລກ
ເປັນລູກໃພ້ຢູ່ໃນຕະກູນທຸສິນ
ເມື່ອຄົນໃນຕະກູນມີພໍ່ປູ່ແມ່ຍ່າເປັນຜູ້ບໍ່ມີສັດທາ ເປັນຄົນຂີ້ຖີ່

[໘໘໐] ຂ້ານ້ອຍກັບເປັນຜູ້ມີສັດທາ ສົມບູນດ້ວຍສີນ
ຍິນດີແຈກຈ່າຍທານໂດຍເຄົາລົບທຸກເມື່ອ
ໄດ້ຖວາຍເຂົ້າໜົມເບື້ອງແດ່ພຣະຜູ້ເປັນເຈົ້າເຊິ່ງກຳລັງທ່ຽວບິນທະບາດຢູ່

[໘໘໑] ຄັ້ງນັ້ນ ຂ້ານ້ອຍບອກແມ່ຍ່າວ່າ ສະມະນະມາເຖິງບ່ອນນີ້ແລ້ວ
ຂ້ານ້ອຍເຫຼື້ອມໃສ ໄດ້ຖວາຍເຂົ້າໜົມເບື້ອງແດ່ທ່ານດ້ວຍມືທັງສອງຂອງຕົນ

[໔໙໔] ແມ່ຍ່າດ່າຂ້ານ້ອຍວ່າ ເຈົ້າເປັນຍິງທີ່ວດີ້
ເປັນຫຍັງເຈົ້າບໍ່ຄິດຈະເປີກສາເຮົາກ່ອນວ່າ ຈະຖວາຍສະມະນະນໍ

[໔໙໓] ຍ້ອນເຫດນີ້ແລ ແມ່ຍ່າຈຶ່ງຮ້າຍດ່າ
ແລ້ວເອົາສາກຕີຂ້ານ້ອຍຖືກຈະງອຍບ່າ
ໄດ້ທຳຮ້າຍຂ້ານ້ອຍ ຂ້ານ້ອຍຈຶ່ງບໍ່ອາດມີຊີວິດຢູ່ໄດ້ດົນ

[໔໙໔] ຍ້ອນຊີວິດສະຫຼາຍລົງ ຂ້ານ້ອຍພົ້ນຈາກທຸກນັ້ນມາ
ໄດ້ຈຸຕິຈາກອັດຕະພາບນັ້ນມາຈຶ່ງເກີດຮ່ວມກັບໝູ່ເທບຊັ້ນໄຕຣທິດ

[໔໙໕] ຍ້ອນບຸນນັ້ນຜິວພັນຂ້ານ້ອຍຈຶ່ງງາມແນວນີ້ ໆລໆ
ແລະມີຮ່າງກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

**ອຸລາຣະວິມານທີ ໑ ຈົບ**

## ໔. ອຸດສຸທາຍິກາວິມານ

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ຍິງຜູ້ຖວາຍທ່ອນອ້ອຍ

(ພຣະມະຫາໂມກຄັນລານະເຖຣະຖາມເທບທິດານັ້ນດ້ວຍຄາຖາເຫຼົ່ານີ້ວ່າ)

[໔໙໖] ທ່ານມີສິຣິຣັດສະໝີກາຍ ມີບໍລິວານຍົດແລະມີອຳນາດ
ເປ່ງຣັດສະໝີສ່ອງທົ່ວແຜ່ນດິນພ້ອມທັງເທວະໂລກໃຫ້ສະຫວ່າງສະໄຫວ
ຮຸ່ງເຮືອງດັ່ງພຣະຈັນແລະພຣະອາທິດ
ແລະດັ່ງທ້າວມະຫາພົມເປ່ງຣັດສະໝີງາມລ້ຳກວ່າ
ຫວຍເທບຊາວໄຕຣທິດພ້ອມທັງພຣະອິນ

[໔໙໗] ອາດຕະມາຂໍຖາມທ່ານ ເທບທິດາຜູ້ເລີໂສມ ປະດັບມາໄລດອກບົວ
ມີມາໄລແກ້ວປະດັບເຊີດ ມີຜິວພັນພຸດຜ່ອງດັ່ງຄຳ
ປະດັບປະດາອາພອນທີ່ສວຍງາມ ຊົງເຄື່ອງປະດັບຊັ້ນເລີດ
ທ່ານເປັນໃຜມາໄຫວ້ອາດຕະມາ

[໔໙໘] ຊາດກ່ອນທ່ານເກີດເປັນມະນຸດໄດ້ເຮັດກຳອັນໃດມາກ່ອນ
ທ່ານສັ່ງສົມທານໄວ້ດີຫຼືວ່າຮັກສາສີນໄວ້ດີ ຈຶ່ງເກີດໃນສະຫວັນ ມີບໍລິວານຍົດ
ຍ້ອນກຳອັນໃດ ເທບທິດາ ອາດຕະມາຖາມແລ້ວ

ຂໍທ່ານຈົ່ງບອກເທີ້ນວ່າ ນີ້ເປັນຜົນຂອງກຳອັນໃດນໍ

(ເທບທິດາຕອບວ່າ)

[໘໙] ພຣະຜູ້ເປັນເຈົ້າຜູ້ຈະເລີນ ເມື່ອບໍ່ດົນມານີ້ ພຣະເຖຣະອົງໜຶ່ງ
ເຂົ້າມາບິນທະບາດຢູ່ເຮືອນຂອງຂ້ານ້ອຍໃນໝູ່ບ້ານນີ້ແລ
ຈາກນັ້ນຂ້ານ້ອຍມີຈິດເຫຼື້ອມໃສ ເກີດປີຕິສຸດປະມານ
ຈຶ່ງໄດ້ຖວາຍທ່ອນອ້ອຍແດ່ທ່ານ

[໙໐໐] ແຕ່ຕໍ່ມາພາຍຫຼັງ ແມ່ຍ່າໄຕ່ຖາມຂ້ານ້ອຍວ່າ
ແມ່ໂຕດີ ເຈົ້າເອົາອ້ອຍໄປຖິ້ມໄວ້ຢູ່ໃສ
ຂ້ານ້ອຍຈຶ່ງຕອບວ່າ ບໍ່ໄດ້ຖິ້ມແລະກໍບໍ່ໄດ້ກິນ
ແຕ່ຂ້ານ້ອຍໄດ້ຖວາຍແດ່ພິກຂຸຜູ້ສະງົບລະງັບໄປແລ້ວ

[໙໐໑] ທັນໃດນັ້ນ ແມ່ຍ່າໄດ້ດ່າຂ້ານ້ອຍວ່າ
ນີ່ເຈົ້າຫຼືຂ້ອຍເປັນໃຫຍ່ກັນແນ່
ວ່າແລ້ວກໍຄວ້າຕັ່ງຟາດຂ້ານ້ອຍ
ຂ້ານ້ອຍຕາຍຈາກມະນຸດສາໂລກນັ້ນແລ້ວກໍມາເກີດເປັນເທບທິດາ

[໙໐໘] ຂ້ານ້ອຍທຳກຸສົນກຳນັ້ນໄວ້ທີ່ນີ້
ຕົນເອງຈຶ່ງໄດ້ມາສະເຫວີຍຜົນກຳທີ່ນຳຄວາມສຸກມາໃຫ້
ໄດ້ຮັບການປີນເປີບັນເທີງໃຈຢູ່
ດ້ວຍກາມມະຄຸນ ໕ ຮ່ວມກັບໝູ່ເທບ

[໙໐໙] ຂ້ານ້ອຍທຳກຸສົນກຳນັ້ນໄວ້ທີ່ນີ້
ຕົນເອງຈຶ່ງໄດ້ມາສະເຫວີຍຜົນກຳທີ່ນຳຄວາມສຸກມາໃຫ້
ມີທ້າວສັກກະຈອມເທບຄຸ້ມຄອງ ມີທວຍເທບຊັ້ນໄຕຣທົດຮັກສາ
ພຽບພ້ອມຢູ່ດ້ວຍກາມມະຄຸນ ໕

[໙໐໘] ຜົນບຸນດັ່ງກ່າວມານີ້ບໍ່ແມ່ນເລັກໜ້ອຍ
ບຸນທີ່ຂ້ານ້ອຍໄດ້ຖວາຍອ້ອຍໃຫ້ຜົນຫຼາຍ
ຂ້ານ້ອຍຈຶ່ງໄດ້ຮັບການປີນເປີ ບັນເທີງໃຈຢູ່
ດ້ວຍກາມມະຄຸນ ໕ ຮ່ວມກັບໝູ່ເທບ

[໙໐໕] ຜົນບຸນດັ່ງກ່າວມານີ້ບໍ່ແມ່ນເລັກໜ້ອຍ

ບຸນທີ່ຂ້ານ້ອຍໄດ້ຖວາຍອ້ອຍມີອານຸພາບຫຼາຍ
ຂ້ານ້ອຍຈຶ່ງມີທ້າວສັກກະຈອມເທບຄຸ້ມຄອງ
ມີຫວຍເທບຊັ້ນໄຕຣທິດຮັກສາ ດັ່ງທ້າວສະຫັດສະໄນໃນນັນທະວັນ

[໓໐໖] ພຣະຜູ້ເປັນເຈົ້າຜູ້ຈະເລີນ ຂ້ານ້ອຍເຂົ້າໄປຫາພຣະຜູ້ເປັນເຈົ້າ
ຜູ້ອະນຸເຄາະເຊິ່ງມີປັນຍາ ແລ້ວຂາບໄຫວ້ແລະຖາມເຖິງຄວາມບໍ່ມີພະຍາດ
ຈາກນັ້ນກໍມີຈິດເຫຼື້ອມໃສ ເກີດປິຕິສຸດປະມານ
ຈຶ່ງໄດ້ຖວາຍທ່ອນອ້ອຍແດ່ພຣະຜູ້ເປັນເຈົ້າ

**ອຸດສຸທາຍິກາວິມານທີ ໔ ຈົບ**

## ໕. ປັນລັງກະວິມານ

## ວ່າດ້ວຍວິມານທີ່ມີບັນລັງສວຍງາມເກີດແກ່ຍິງຜູ້ປະພຶດທຳ

(ພຣະມະຫາໂມກຄັນລານະເຖຣະຖາມເທບທິດານັ້ນດ້ວຍຄາຖາວ່າ)

[໓໐໗] ເທບທິດາຜູ້ມີອານຸພາບຫຼາຍ ທ່ານສະແດງລິດຕ່າງ ໆ ໄດ້ຫຼາຍຮູບແບບ
ຢູ່ເທິງບັນລັງວິມານອັນເລີເລີດ ໜ້ານອນ ໂອ່ໂຖງ
ວິຈິດດ້ວຍແກ້ວມະນີແລະຄຳ ກະຈັດກະຈາຍດ້ວຍດອກໄມ້

[໓໐໘] ອັນໜຶ່ງ ຮອບຂ້າງທ່ານມີເທບອັບປະສອນເຫຼົ່ານີ້
ຟ້ອນລຳຂັບຮ້ອງໃຫ້ບັນເທີງໃຈຢູ່ສະເໝີ
ເທບທິດາຜູ້ມີອານຸພາບຫຼາຍ ເມື່ອທ່ານເກີດເປັນມະນຸດ
ໄດ້ເຮັດບຸນອັນໃດໄວ້ ຈຶ່ງໄດ້ສຳເລັດເປັນເທບທິດາຜູ້ມີລິດ
ຍ້ອນບຸນອັນໃດ ທ່ານຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

(ເທບທິດາຕອບວ່າ)

[໓໐໙] ເມື່ອຂ້ານ້ອຍເກີດເປັນມະນຸດຢູ່ໃນໝູ່ມະນຸດ
ເປັນລູກໃພ້ໃນຕະກູນທີ່ຮັ່ງມີຕະກູນໜຶ່ງ
ມີນິໄສບໍ່ມັກໂກດ ປະຕິບັດຕາມຄຳສັ່ງຂອງສາມີສະເໝີ
ບໍ່ຜະໝາດໃນການຮັກສາອຸໂປສົດສິນ

[໑໑໐]  ເມື່ອຂ້ານ້ອຍເປັນມະນຸດຍັງສາວຢູ່ ບໍ່ປະພຶດໃຝ່ຕ່ຳ
ມີໃຈດີ ເຮັດໂຕໃຫ້ສາມີພໍໃຈ
ຊາດກ່ອນຂ້ານ້ອຍມີຄວາມປະພຶດເປັນທີ່ໜ້າພໍໃຈ
ທັງມື້ແລະຄືນ ເປັນຄົນມີສີນ

[໑໑໑]  ໄດ້ພໍ່າເພັງສິກຂາບົດທັງຫຼາຍຢ່າງຄົບຖ້ວນ
ຄືງົດເວັ້ນຈາກການຂ້າສັດ
ບໍ່ລັກຊັບ ມີວຽກງານທາງກາຍບໍລິສຸດ
ປະພຶດພົມມະຈັນໄດ້ບໍລິສຸດ
ສະອາດ ບໍ່ກ່າວຕົວະ ແລະບໍ່ດື່ມນ້ຳເມົາ

[໑໑໒]  ມີໃຈເຫຼື້ອມໃສ ປະພຶດຕາມທຳ ປາບປື້ມໃຈ
ເຂົ້າຈຳອຸໂປສົດສີນເຊິ່ງປະກອບດ້ວຍອົງ ໘
ທຸກມື້ ໑໔ ຄ່ຳ ໑໕ ຄ່ຳແລະ ໘ ຄ່ຳແຫ່ງປັກ
ແລະຕະຫຼອດປາຕິຫາຣິຍະປັກ

[໑໑໓]  ເມື່ອສະມາທານກຸສົນທຳອັນປະເສີດ
ທີ່ປະກອບດ້ວຍອົງ ໘ ອັນສູງສຸດ
ມີສຸກເປັນອານິສົງແນວນີ້ແລ້ວ ຂ້ານ້ອຍເປັນຄົນດີ
ປະຕິບັດຕາມຄຳສັ່ງຂອງສາມີສະເໝີ
ເປັນສາວິກາຂອງພຣະສຸຄົດເຈົ້າມາກ່ອນ

[໑໑໔]  ເມື່ອເຮັດກຸສົນກຳແນວນີ້ໃນຂະນະທີ່ຍັງມີຊີວິດຢູ່
ຕາຍແລ້ວມາສູ່ສະຫວັນ ມີສ່ວນໄດ້ສະເຫວີຍທິບພະສົມບັດອັນວິເສດ
ຈຶ່ງໄດ້ສຳເລັດເປັນເທບທິດາຜູ້ມີລິດໃນອະພິສຳປະຣາຍະພົບ
[໑໑໕]  ຂ້ານ້ອຍມີໝູ່ເທບອັບປະສອນຫ້ອມລ້ອມ ມີຣັດສະໝີໃນໂຕເອງ
ບັນເທີງໃຈຢູ່ໃນວິມານຜາສາດທີ່ຍອດຢ້ຽມໜ້າອອນຊອນໃຈ
ໝູ່ເທບແລະເທບທິດາພາກັນມາຊົມຊື່ນຂ້ານ້ອຍ
ຜູ້ມີອາຍຸຍືນເຊິ່ງມາຍັງເທບວິມານນີ້

**ປັນລັງກະວິມານທີ ໑ ຈົບ**

# ๔. ລະຕາວິມານ

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ເທບທິດາຊື່ລະດາ

[໓໑໖] ລະດາເທບທິດາ ສັດຊາເທບທິດາ ປະວະຣາເທບທິດາ
ອັດສິມຸດິເທບທິດາແລະສຸດາເທບທິດາ
ຜູ້ມີຄວາມຮຸ່ງເຮືອງ ເປັນທິດາຂອງທ້າວເວດສະວັນມະຫາຣາດ
ຕ່າງເປັນນາງບາດປະຣິຈາຣິກາຂອງທ້າວສັກກະເທວະຣາດ
ຜູ້ຊົງຄຸນອັນປະເສີດ ຊົງສິຣິ ງົດງາມຢູ່ດ້ວຍຄຸນນະທຳ

[໓໑໗] ເທບທິດາ ໕ ນາງຕາມທີ່ກ່າວມານີ້ໄດ້ພາກັນໄປອາບນ້ຳຢູ່ແມ່ນ້ຳ
ມີກະແສນ້ຳເຢັນ ເດຍລະດາດດ້ວຍດອກບົວເປັນທີ່ປອດໄພ
ເຊິ່ງຢູ່ໃນປ່າຫິມະພານນີ້ ເມື່ອອາບນ້ຳ ຢູ່ບ່ອນນັ້ນແລ້ວ
ເທບທິດາເຫຼົ່ານັ້ນພາກັນແຈ່ມໃສ ຟ້ອນລຳ ຂັບຮ້ອງ
ສຸດາເທບທິດາໄດ້ເວົ້າກັບລະດາເທບທິດາວ່າ

[໓໑໘] ຂ້າແດ່ເອື້ອຍຜູ້ທັດຊົງພວງອຸບົນ ມີມາໄລແກ້ວປະດັບເຊີດ
ມີຜິວພັນພຸດຜ່ອງດັ່ງຄຳ ມີໜ່ວຍຕາສີນ້ຳຕານ
ມີຜິວພັນງົດງາມ ເໝືອນທ້ອງຟ້າ ຂາດກ້ອນເຜື້ອໝອກ ມີອາຍຸຍືນ
ເຮົາຂໍຖາມເອື້ອຍ ຍ້ອນບຸນອັນໃດເຮັດໃຫ້ເອື້ອຍໄດ້ບໍລິວານຍົດແລະກຽດຕິຍົດ

[໓໑໙] ຍ້ອນເຮັດບຸນອັນໃດໄວ້ ເອື້ອຍຈຶ່ງເປັນທີ່ພໍໃຈຂອງສາມີ
ມີໂສມງາມເລີດກວ່າໃຜ ທັງສະຫຼາດເປັນເລີດ
ໃນການຟ້ອນລຳ ຂັບຮ້ອງ ແລະບັນເລງດົນຕີ
ອ້າຍເທບພະບຸດແລະເທບທິດາຖາມຢູ່ສະເໝີ ໆ
ຂໍໂຜດໄດ້ບອກພວກເຮົາດ້ວຍເທີ້ນ

(ລະດາເທບທິດາຕອບວ່າ)

[໓໒໐] ເມື່ອເອື້ອຍເກີດເປັນມະນຸດຢູ່ໃນມະນຸດສາໂລກ
ເປັນສະໃພ້ໃນຕະກູນຮັ່ງມີຕະກູນໜຶ່ງ
ມີນິໄສບໍ່ມັກໂກດ ປະຕິບັດຕາມຄຳສັ່ງຂອງສາມີສະເໝີ
ບໍ່ຜະໝາດໃນການຮັກສາອຸໂປສົດສິນ

[໓໔໑] ເມື່ອເອື້ອຍເປັນມະນຸດຍັງສາວຢູ່ ບໍ່ປະພຶດໃຝ່ຕ່ຳ
ມີໃຈດີ ເຮັດໂຕໃຫ້ສາມີພໍໃຈ
ເຮັດໂຕໃຫ້ພໍ່ແມ່ສາມີ ອ້າຍນ້ອງສາມີ
ພ້ອມທັງຂ້າທາດຊາຍຍິງໃຫ້ຊື່ນຊອບ
ຍ້ອນບຸນທີ່ເຮັດໃນເວລາເປັນຍິງສະໃພ້ນັ້ນ
ເຮັດໃຫ້ເອື້ອຍໄດ້ບໍລິວານຍົດແລະກຽດຕິຍົດ

[໓໔໔] ຍ້ອນກຸສົນກຳນັ້ນ ເອື້ອຍຈຶ່ງໄດ້ດີກວ່າເທບທິດາເຫຼົ່າອື່ນ
ໂດຍຖານະ ໔ ຄື ອາຍຸ ວັນນະ ສຸຂະ ແລະພະລະ
ໄດ້ສະເຫວີຍຄວາມແຈ່ມໃສຍິນດີເປັນຢ່າງຫຼາຍ

(ເມື່ອສຸດາເທບທິດາໄດ້ຟັງຄຳຕອບດັ່ງນີ້ແລ້ວຈຶ່ງໄດ້ຖາມເອື້ອຍທັງສາມວ່າ)

[໓໔໓] ເອື້ອຍທັງສາມ ໄດ້ຍິນເລື່ອງທີ່ເອື້ອຍລະດານີ້ເວົ້າບໍ
ເຮົາໄດ້ທູນຖາມເຖິງເລື່ອງທີ່ພວກເຮົາມັກສົງໄສກັນຫຼາຍ
ເອື້ອຍລະດາກໍກ່າວແກ້ໄດ້ຢ່າງບໍ່ຜິດພາດ
ວ່າກັນວ່າ ຂຶ້ນຊື່ວ່າສາມີຍ່ອມເປັນບ່ອນເພິ່ງອັນປະເສີດ
ແລະເປັນເທບສູງສຸດຂອງພວກແມ່ຍິງເຮົາ

[໓໔໔] ຂໍໃຫ້ເຮົາທຸກຄົນຈົ່ງປະພຶດທຳໃນສາມີ
ຄືກັບສະຕີທີ່ດີປະພຶດຢຳເກງສາມີ
ເມື່ອເຮົາທຸກຄົນປະພຶດທຳໃນສາມີ
ກໍຈັກໄດ້ສົມບັດຕາມທີ່ເອື້ອຍລະດາເວົ້າ

[໓໔໕] ພະຍາຣາດຊະສີທີ່ສັນຈອນໄປຕາມປ່າໄພໃກ້ຕີນພູ
ອາໄສພູຫຼວງຢູ່ແລ້ວກໍທ່ຽວຕະຄຸບຂ້າສັດສີ່ຕີນ
ຈຳພວກເນື້ອທີ່ດ້ອຍກຳລັງ ກັດກິນເປັນອາຫານສັນໃດ

[໓໔໖] ສະຕີຜູ້ມີສັດທາ ເປັນອະຣິຍະສາວິກາໃນສາດສະໜານີ້ກໍຄືກັນສັນນັ້ນ
ຍັງອາໄສສາມີໃຫ້ການລ້ຽງດູ ກໍຄວນປະພຶດເກື້ອກູນຢຳເກງສາມີ
ນາງປະພຶດທຳໂດຍລະງັບຄວາມໂກດ ກຳຈັດຄວາມຂີ້ຖີ່ໄດ້
ຈຶ່ງແຈ່ມໃສບັນເທີງໃຈຢູ່ເທິງສະຫວັນ

**ລະດາວິມານທີ ໔ ຈົບ**

# ໕. ຄຸດຕິລະວິມານ
## ວ່າດ້ວຍວິມານທີ່ຄຸດຕິລາຈານເຄີຍໄປຢ້ຽມ

# ໑. ວັດທຸດຕະມະຫາຍິກາວິມານ
## ວ່າດ້ວຍວິມານທີ່ເກີດແກ່ຍິງຜູ້ຖວາຍຜ້າເນື້ອດີຢ້ຽມ

(ພຣະໂພທິສັດນາມວ່າຄຸດຕິລະໄດ້ຂາບທູນທ້າວສັກກະເທວະຣາດວ່າ)

[໓໔໗] ຂ້າແດ່ທ້າວໂກສີ ຂ້າພຣະອົງໄດ້ສອນວິຊາດີດພິນ ໗ ສາຍ
ເຊິ່ງມີສຽງມ່ວນຫຼາຍ ໜ້າອອນຊອນໃຈ
ໃຫ້ແກ່ມຸສິລະຜູ້ເປັນສິດ
ເຂົາຕັ້ງໃຈຈະດີດພິນແຂ່ງຂັນກັບຂ້າພຣະອົງກາງເວທີ
ຂໍພຣະອົງຈົ່ງຊົງເປັນບ່ອນເພິ່ງຂອງຂ້າພຣະອົງດ້ວຍເທີ້ນ

(ທ້າວສັກກະເທວະຣາຊະຕັດໃຫ້ກຳລັງໃຈດ້ວຍຄາຖາວ່າ)

[໓໔໘] ທ່ານອາຈານ ຂ້ານ້ອຍຈະເປັນບ່ອນເພິ່ງຂອງທ່ານອາຈານ
ຍ້ອນຂ້ານ້ອຍເປັນຜູ້ບູຊາອາຈານ
ສິດຈັກຊະນະອາຈານບໍ່ໄດ້
ອາຈານຈັກຊະນະສິດແນ່ນອນ

(ເມື່ອການຕໍ່ມາ ທ້າວສັກກະເທວະຣາດຮັບສັ່ງໃຫ້ມາຕະລີເທບສາຣະຖີ ນຳເວຊະຍັນຕະຣາດຊະລົດ ລົງມາຮັບຄຸດຕິລາຈານໄປສູ່ເທວະໂລກເພື່ອໃຫ້ດີດພິນຖວາຍ ຄຸດຕິລາຈານ ຈຶ່ງຂາບທູນພຣະອົງ ໃນທ່າມກາງເທບບໍລິສັດ ເພື່ອຂໍໄຕ່ຖາມເຖິງບຸບພະກຳຂອງເທບທິດາທັງຫຼາຍຢູ່ບ່ອນນັ້ນ ເປັນລາງວັນແຫ່ງການດີດພິນກ່ອນ ເມື່ອໄດ້ຮັບອະນຸຍາດແລ້ວຈຶ່ງໄຕ່ຖາມເຖິງບຸບພະກຳຂອງເທບທິດາເຫຼົ່ານັ້ນ ຄຳຖາມຂອງຄຸດຕິລາຈານ ເປັນເຊັ່ນດຽວກັບຂອງພຣະມະຫາໂມກຄັນລານະເຖຣະ)[๑] ຄຳຕອບຂອງເຫຼົ່າເທບທິດາເປັນເຊັ່ນດຽວກັນທັງສອງຄັ້ງ

[໓໔໙] ເທບທິດາ ທ່ານມີຜິວພັນງາມຍິ່ງ
ເປ່ງຣັດສະໝີສະຫວ່າງສະໄຫວໄປທົ່ວທຸກທິດຢູ່ ຄືດາວປະກາຍພຶກ

[໓໕໐] ຍ້ອນບຸນອັນໃດຜິວພັນທ່ານຈຶ່ງງາມແນວນີ້
ຜົນອັນເພິ່ງປາຖະໜາຈຶ່ງສຳເລັດແກ່ທ່ານໃນວິມານນີ້
ແລະໂພຄະທັງມວນລ້ວນໜ້າພໍໃຈຈຶ່ງເກີດຂຶ້ນແກ່ທ່ານ

[໓໓໑] ເທບທິດາຜູ້ມີອານຸພາບຫຼາຍ ອາດຕະມາຂໍຖາມວ່າ
ເມື່ອທ່ານເກີດເປັນມະນຸດໄດ້ເຮັດບຸນອັນໃດໄວ້
ຍ້ອນບຸນອັນໃດທ່ານຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

[໓໓໒] ເທບທິດານັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ
ຈຶ່ງຕອບບັນຫາຜົນກຳໄປຕາມທີ່ພຣະເຖຣະຖາມວ່າ

[໓໓໓] ນາຣີຜູ້ຖວາຍຜ້າເນື້ອດີຍິ່ງມ
ເປັນຜູ້ປະເສີດໃນໝູ່ນະຣະແລະນາຣີທັງຫຼາຍ
ນາງຕັ້ງໃຈຖວາຍສິ່ງທີ່ໜ້າຮັກ
ຈຶ່ງໄດ້ທິບພະສະຖານທີ່ໜ້າຈະເລີນໃຈປານນີ້

[໓໓໔] ຂໍນິມົນພຣະຜູ້ເປັນເຈົ້າເບິ່ງວິມານຂອງຂ້ານ້ອຍນັ້ນເທີ້ນ
ຂ້ານ້ອຍເປັນນາງອັບປະສອນຜູ້ມີຮູບຮ່າງແລະຜິວພັນໜ້າຮັກແພງ
ທັງຍັງເລີເລີດກວ່ານາງອັບປະສອນນັບພັນອີກດ້ວຍ
ຂໍນິມົນພຣະຜູ້ເປັນເຈົ້າເບິ່ງຜົນຂອງບຸນທັງຫຼາຍເທີ້ນ

[໓໓໕] ຍ້ອນບຸນນັ້ນຜິວພັນຂ້ານ້ອຍຈຶ່ງງາມແນວນີ້
ຜົນອັນເພິ່ງປາຖະໜາຈຶ່ງສຳເລັດແກ່ຂ້ານ້ອຍໃນວິມານນີ້
ແລະໂພຄະທັງມວນລ້ວນໜ້າພໍໃຈຈຶ່ງເກີດຂຶ້ນແກ່ຂ້ານ້ອຍ

[໓໓໖] ຂ້າແດ່ພິກຂຸຜູ້ມີອານຸພາບຫຼາຍ ຂ້ານ້ອຍຂໍຂາບຮຽນວ່າ
ຍ້ອນບຸນທີ່ໄດ້ເຮັດໄວ້ເມື່ອເກີດເປັນມະນຸດ
ຂ້ານ້ອຍຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

(ວິມານ ໔ ເລື້ອງທີ່ຈະກ່າວຕໍ່ໄປນີ້ມີຄວາມພິດສະດານຄືວັດຖຸດຕະມະຫາຍິກາວິມານ)

## ໘. ປຸບຜຸດຕະມະຫາຍິກາວິມານ (໑)

## ວ່າດ້ວຍວິມານທີ່ເກີດແກ່ຍິງຜູ້ຖວາຍດອກໄມ້ທີ່ດີຍິ່ງມ

(ພຣະມະຫາໂມກຄັນລານະເຖຣະຖາມວ່າ)

[໓໓໗] ເທບທິດາ ທ່ານມີຜິວພັນງາມຍິ່ງ
ເປ່ງຣັດສະໝີສະຫວ່າງສະໄຫວໄປທົ່ວທຸກທິດຢູ່ ຄືດາວປະກາຍພຶກ

[໓໓໘] ຍ້ອນບຸນອັນໃດຜິວພັນທ່ານຈຶ່ງງາມແນວນີ້
ຜົນອັນເພິ່ງປາຖະໜາຈຶ່ງສຳເລັດແກ່ທ່ານໃນວິມານນີ້
ແລະໂພຄະທັງມວນລ້ວນໜ້າພໍໃຈຈຶ່ງເກີດຂຶ້ນແກ່ທ່ານ

[໓໓໙] ເທບທິດາຜູ້ມີອານຸພາບຫຼາຍ ອາດຕະມາຂໍຖາມວ່າ
ເມື່ອທ່ານເກີດເປັນມະນຸດໄດ້ເຮັດບຸນອັນໃດໄວ້
ຍ້ອນບຸນອັນໃດທ່ານຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

[໓໔໐] ເທບທິດານັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ
ຈຶ່ງຕອບບັນຫາຜົນກຳໄປຕາມທີ່ພຣະເຖຣະຖາມວ່າ

[໓໔໑] ນາຣີຜູ້ຖວາຍດອກໄມ້ຊັ້ນດີຢູ່ງມ
ເປັນຜູ້ປະເສີດໃນໝູ່ນະຣະແລະນາຣີທັງຫຼາຍ
ນາງຕັ້ງໃຈຖວາຍສິ່ງທີ່ໜ້າຮັກ
ຈຶ່ງໄດ້ທິບພະສະຖານທີ່ໜ້າຈະເລີນໃຈປານນີ້

[໓໔໘] ຂໍນິມົນພຣະຜູ້ເປັນເຈົ້າເບິ່ງວິມານຂອງຂ້ານ້ອຍນັ້ນ
ຂ້ານ້ອຍເປັນນາງອັບປະສອນຜູ້ມີຮູບຮ່າງແລະຜິວພັນໜ້າຮັກແພງ
ທັງຍັງເລີເລີດກວ່ານາງອັບປະສອນນັບພັນອີກດ້ວຍ
ຂໍນິມົນພຣະຜູ້ເປັນເຈົ້າເບິ່ງຜົນຂອງບຸນທັງຫຼາຍເທີ້ນ

[໓໔໓] ຍ້ອນບຸນນັ້ນຜິວພັນຂ້ານ້ອຍຈຶ່ງງາມແນວນີ້
ຜົນອັນເພິ່ງປາຖະໜາຈຶ່ງສຳເລັດແກ່ຂ້ານ້ອຍໃນວິມານນີ້
ແລະໂພຄະທັງມວນລ້ວນໜ້າພໍໃຈຈຶ່ງເກີດຂຶ້ນແກ່ຂ້ານ້ອຍ

[໓໔໔] ຂ້າແດ່ພິກຂຸຜູ້ມີອານຸພາບຫຼາຍ ຂ້ານ້ອຍຂໍຂາບຮຽນວ່າ
ຍ້ອນບຸນທີ່ໄດ້ເຮັດໄວ້ເມື່ອເກີດເປັນມະນຸດ
ຂ້ານ້ອຍຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

# ໓. ຄັນທຸດຕະມະທາຍິກາວິມານ ( ໘ )

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ຍິງຜູ້ຖວາຍຂອງຫອມຊັ້ນເລີດ

(ພຣະມະຫາໂມກຄັນລານະເຖຣະຖາມວ່າ)

[໓໘໕] ເທບທິດາ ທ່ານມີຜິວພັນງາມຍິ່ງ
ເປ່ງຣັດສະໝີສະຫວ່າງສະໄຫວໄປທົ່ວທຸກທິດຢູ່ ຄືດາວປະກາຍພຶກ

[໓໘໖] ຍ້ອນບຸນອັນໃດຜິວພັນທ່ານຈຶ່ງງາມແນວນີ້
ຜົນອັນເພິ່ງປາຖະໜາຈຶ່ງສຳເລັດແກ່ທ່ານໃນວິມານນີ້
ແລະໂພຄະທັງມວນລ້ວນໜ້າພໍໃຈຈຶ່ງເກີດຂຶ້ນແກ່ທ່ານ

[໓໘໗] ເທບທິດາຜູ້ມີອານຸພາບຫຼາຍ ອາດຕະມາຂໍຖາມວ່າ
ເມື່ອທ່ານເກີດເປັນມະນຸດໄດ້ເຮັດບຸນອັນໃດໄວ້
ຍ້ອນບຸນອັນໃດທ່ານຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

[໓໘໘] ເທບທິດານັ້ນດີໃຈທີ່ພຣະໂມກຄັນລານະເຖຣະຖາມ
ຈຶ່ງຕອບບັນຫາຜົນກຳໄປຕາມທີ່ພຣະເຖຣະຖາມວ່າ

[໓໘໙] ນາຣີຜູ້ຖວາຍຂອງຫອມຊັ້ນເລີດ
ເປັນຜູ້ປະເສີດໃນໝູ່ນະຣະແລະນາຣີທັງຫຼາຍ
ນາງຕັ້ງໃຈຖວາຍສິ່ງທີ່ໜ້າຮັກ
ຈຶ່ງໄດ້ທິບພະສະຖານທີ່ໜ້າຈະເລີນໃຈປານນີ້

[໓໙໐] ຂໍນິມົນພຣະຜູ້ເປັນເຈົ້າເບິ່ງວິມານຂອງຂ້ານ້ອຍນັ້ນ
ຂ້ານ້ອຍເປັນນາງອັບປະສອນຜູ້ມີຮູບຮ່າງແລະຜິວພັນໜ້າຮັກແພງ
ທັງຍັງເລີເລີດກວ່ານາງອັບປະສອນນັບພັນອີກດ້ວຍ
ຂໍນິມົນພຣະຜູ້ເປັນເຈົ້າເບິ່ງຜົນຂອງບຸນທັງຫຼາຍເທີ້ນ

[໓໙໑] ຍ້ອນບຸນນັ້ນຜິວພັນຂ້ານ້ອຍຈຶ່ງງາມແນວນີ້
ຜົນອັນເພິ່ງປາຖະໜາຈຶ່ງສຳເລັດແກ່ຂ້ານ້ອຍໃນວິມານນີ້
ແລະໂພຄະທັງມວນລ້ວນໜ້າພໍໃຈຈຶ່ງເກີດຂຶ້ນແກ່ຂ້ານ້ອຍ

[໓໕໘] ຂ້າແດ່ພິກຂຸຜູ້ມີອານຸພາບຫຼາຍ ຂ້ານ້ອຍຂໍຂາບຮຽນວ່າ
ຍ້ອນບຸນທີ່ໄດ້ເຮັດໄວ້ເມື່ອເກີດເປັນມະນຸດ
ຂ້ານ້ອຍຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

## ໘. ຜະລຸດຕະມະທາຍິກາວິມານ (໓)

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ຍິງຜູ້ຖວາຍໝາກໄມ້ຢ່າງດີຢ້ຽມ

(ພຣະມະຫາໂມກຄັນລານະເຖຣະຖາມວ່າ)

[໓໕໓] ເທບທິດາ ທ່ານມີຜິວພັນງາມຍິ່ງ
ເປ່ງຣັດສະໝີສະຫວ່າງສະໄຫວໄປທົ່ວທຸກທິດຢູ່ ຄືດາວປະກາຍພຶກ

[໓໕໔-໓໕໕] ຍ້ອນບຸນອັນໃດຜິວພັນທ່ານຈຶ່ງງາມແນວນີ້ ໆລໆ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

[໓໕໖] ເທບທິດານັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ
ຈຶ່ງຕອບບັນຫາຜົນກຳໄປຕາມທີ່ພຣະເຖຣະຖາມວ່າ

[໓໕໗] ນາຣີຜູ້ໄດ້ຖວາຍໝາກໄມ້ຢ່າງດີຢ້ຽມ
ເປັນຜູ້ປະເສີດໃນໝູ່ນະຣະແລະນາຣີທັງຫຼາຍ
ນາງຕັ້ງໃຈຖວາຍສິ່ງທີ່ໜ້າຮັກ
ຈຶ່ງໄດ້ທິບພະສະຖານທີ່ໜ້າຈະເລີນໃຈແນວນີ້

[໓໕໘] ຂໍນິມົນພຣະຜູ້ເປັນເຈົ້າເບິ່ງວິມານຂອງຂ້ານ້ອຍນັ້ນ
ຂ້ານ້ອຍເປັນນາງອັບປະສອນຜູ້ມີຮູບຮ່າງແລະຜິວພັນໜ້າຮັກແພງ
ທັງຍັງເລີເລີດກວ່ານາງອັບປະສອນນັບພັນອີກດ້ວຍ
ຂໍນິມົນພຣະຜູ້ເປັນເຈົ້າເບິ່ງຜົນຂອງບຸນທັງຫຼາຍເທີ້ນ

[໓໕໙-໓໖໐] ຍ້ອນບຸນນັ້ນຂ້ານ້ອຍຈຶ່ງມີຜິວພັນງາມແນວນີ້ ໆລໆ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

# ໕. ຣະສຸດຕະມະຫາຍິກາວິມານ (໔)

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ຍິງຜູ້ຖວາຍອາຫານທີ່ມີດເລີດ

(ພຣະມະຫາໂມກຄັນລານະເຖຣະຖາມວ່າ)

[໓໖໑] ເທບທິດາ ທ່ານມີຜິວພັນງາມຍິ່ງ
ເປ່ງຣັດສະໝີສະຫວ່າງສະໄຫວໄປທົ່ວທຸກທິດຢູ່ ຄືດາວປະກາຍພຶກ

[໓໖໔-໓໖໓] ຍ້ອນບຸນອັນໃດຜິວພັນທ່ານຈຶ່ງງາມແບວນີ້ ຯລຯ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແບວນີ້

[໓໖໔] ເທບທິດານັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ
ຈຶ່ງຕອບບັນຫາຜົນກຳໄປຕາມທີ່ພຣະເຖຣະຖາມວ່າ

[໓໖໕] ນາຣີຜູ້ຖວາຍອາຫານເລີດຣົດ
ເປັນຜູ້ປະເສີດໃນໝູ່ນະຣະແລະນາຣີທັງຫຼາຍ
ນາງຕັ້ງໃຈຖວາຍສິ່ງທີ່ໜ້າຮັກ
ຈຶ່ງໄດ້ທິບພະສະຖານທີ່ໜ້າຈະເລີນໃຈແບວນີ້

[໓໖໖] ຂໍນິມົນພຣະຜູ້ເປັນເຈົ້າເບິ່ງວິມານຂອງຂ້ານ້ອຍນັ້ນ
ຂ້ານ້ອຍເປັນນາງອັບປະສອນຜູ້ມີຮູບຮ່າງແລະຜິວພັນໜ້າຮັກແພງ
ທັງຍັງເລີເລີດກວ່ານາງອັບປະສອນນັບພັນອີກດ້ວຍ
ຂໍນິມົນພຣະຜູ້ເປັນເຈົ້າເບິ່ງຜົນຂອງບຸນທັງຫຼາຍເທີ້ນ

[໓໖໗-໓໖໘] ຍ້ອນບຸນນັ້ນຜິວພັນຂ້ານ້ອຍຈຶ່ງງາມແບວນີ້ ຯລຯ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແບວນີ້

# ໖. ຄັນທະປັນຈັງຄຸລິກະຫາຍິກາວິມານ

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ຍິງຜູ້ເຄີຍໃຊ້ແປ້ງເຈີມສະຖູບ

(ພຣະມະຫາໂມກຄັນລານະເຖຣະຖາມວ່າ)

[໓໖໙] ເທບທິດາ ທ່ານມີຜິວພັນງາມຍິ່ງ
ເປ່ງຣັດສະໝີສະຫວ່າງສະໄຫວໄປທົ່ວທຸກທິດຢູ່ ຄືດາວປະກາຍພຶກ

[໓໗໐-໓໗໑] ຍ້ອນບຸນອັນໃດຜິວພັນທ່ານຈຶ່ງງາມແບບນີ້ ຯລຯ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແບບນີ້

[໓໗໘] ເທບທິດານັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ
ຈຶ່ງຕອບບັນຫາຜົນກຳໄປຕາມທີ່ພຣະເຖຣະຖາມວ່າ

[໓໗໙] ຂ້ານ້ອຍໃຊ້ນິ້ວທັງຫ້າຈຸ່ມກະແຈະເຈີມທີ່ພຣະສະຖູບ(ຄຳ)
ຂອງພຣະຜູ້ມີພຣະພາກເຈົ້າຊົງພຣະນາມວ່າກັດສະປະ
ຂ້ານ້ອຍນັ້ນຕັ້ງໃຈຖວາຍສິ່ງທີ່ໜ້າຮັກ
ຈຶ່ງໄດ້ທິບພະສະຖານທີ່ໜ້າຈະເລີນໃຈແບບນີ້

[໓໗໔] ຂໍນິມົນພຣະຜູ້ເປັນເຈົ້າເບິ່ງວິມານຂອງຂ້ານ້ອຍນັ້ນ
ຂ້ານ້ອຍເປັນນາງອັບປະສອນຜູ້ມີຮູບຮ່າງແລະຜິວພັນໜ້າຮັກແພງ
ທັງຍັງເລີເລີດກວ່ານາງອັບປະສອນນັບພັນອີກດ້ວຍ
ຂໍນິມົນພຣະຜູ້ເປັນເຈົ້າເບິ່ງຜົນຂອງບຸນທັງຫຼາຍເທີ້ນ

[໓໗໕-໓໗໖] ຍ້ອນບຸນນັ້ນຜິວພັນຂ້ານ້ອຍຈຶ່ງງາມແບບນີ້ ຯລຯ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແບບນີ້

(ວິມານ ໔ ເລື້ອງທີ່ຈະກ່າວຕໍ່ໄປນີ້ ມີຄວາມພິດສະດານຄືຄັນທະປັນຈັງຄຸລິກະທາຍິກາວິມານ)

## ໗. ເອກູໂປສະຖະວິມານ (໑)
## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ຍິງຜູ້ຮັກສາອຸໂປສົດ ໑ ມື້

(ພຣະມະຫາໂມກຄັນລານະເຖຣະຖາມວ່າ)

[໓໗໗-໓໗໙] ເທບທິດາ ທ່ານມີຜິວພັນງາມຍິ່ງ
ເປ່ງຣັດສະໝີສະຫວ່າງສະໄຫວໄປທົ່ວທຸກທິດຢູ່ ຄືດາວປະກາຍພຶກ ຯລຯ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແບບນີ້

[໓໘໐] ເທບທິດານັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ
ຈຶ່ງຕອບບັນຫາຜົນກຳໄປຕາມທີ່ພຣະເຖຣະຖາມວ່າ
[໓໘໑] ຂ້ານ້ອຍໄດ້ເຫັນພິກຂຸແລະພິກຂຸນີທັງຫຼາຍກຳລັງເດີນທາງ
ໄດ້ຟັງທຳມະເທດສະໜາຂອງທ່ານເຫຼົ່ານັ້ນແລ້ວ
ໄດ້ເຂົ້າຈຳອຸໂປສົດສິ້ນໜຶ່ງມື້

[໓໗໔]	ຂໍນິມົນພຣະຜູ້ເປັນເຈົ້າເບິ່ງວິມານຂອງຂ້ານ້ອຍນັ້ນ
ຂ້ານ້ອຍເປັນນາງອັບປະສອນຜູ້ມີຮູບຮ່າງແລະຜິວພັນໜ້າຮັກແພງ
ທັງຍັງເລີເລີດກວ່ານາງອັບປະສອນນັບພັນອີກດ້ວຍ
ຂໍນິມົນພຣະຜູ້ເປັນເຈົ້າເບິ່ງຜົນຂອງບຸນທັງຫຼາຍເທີ້ນ

[໓໗໕-໓໗໔]	ຍ້ອນບຸນນັ້ນຜິວພັນຂ້ານ້ອຍຈຶ່ງງາມແນວນີ້ ຯລຯ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

## ໗. ອຸທະກະທາຍິກາວິມານ ( ໔ )

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ຍິງຜູ້ຖວາຍນ້ຳບ້ວນປາກແລະນ້ຳດື່ມ

(ພຣະມະຫາໂມກຄັນລານະເຖຣະຖາມວ່າ)

[໓໗໕]	ເທບທິດາ ທ່ານມີຜິວພັນງາມຍິ່ງ
ເປ່ງຣັດສະໝີສະຫວ່າງສະໄຫວໄປທົ່ວທຸກທິດຢູ່ ຄືດາວປະກາຍພຶກ

[໓໗໖-໓໗໗]	ຍ້ອນບຸນອັນໃດຜິວພັນທ່ານຈຶ່ງງາມແນວນີ້ ຯລຯ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

[໓໗໗]	ເທບທິດານັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ
ຈຶ່ງຕອບບັນຫາຜົນກຳໄປຕາມທີ່ພຣະເຖຣະຖາມວ່າ

[໓໗໙]	ຂ້ານ້ອຍຍືນຢູ່ໃນນ້ຳ ມີຈິດເຫຼື້ອມໃສ
ໄດ້ຖວາຍນ້ຳແດ່ພິກຂຸອົງໜຶ່ງ
ຂ້ານ້ອຍນັ້ນຕັ້ງໃຈຖວາຍສິ່ງທີ່ໜ້າຮັກ
ຈຶ່ງໄດ້ທິບພະສະຖານທີ່ໜ້າຈະເລີນໃຈແນວນີ້

[໓໙໐]	ຂໍນິມົນພຣະຜູ້ເປັນເຈົ້າເບິ່ງວິມານຂອງຂ້ານ້ອຍນັ້ນ
ຂ້ານ້ອຍເປັນນາງອັບປະສອນຜູ້ມີຮູບຮ່າງແລະຜິວພັນໜ້າຮັກແພງ
ທັງຍັງເລີເລີດກວ່ານາງອັບປະສອນນັບພັນອີກດ້ວຍ
ຂໍນິມົນພຣະຜູ້ເປັນເຈົ້າເບິ່ງຜົນຂອງບຸນທັງຫຼາຍເທີ້ນ

[໓໙໑-໓໙໔]	ຍ້ອນບຸນນັ້ນຜິວພັນຂ້ານ້ອຍຈຶ່ງງາມແນວນີ້ ຯລຯ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

## ໙. ອຸປັດຖານະວິມານ (໓)

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ຍິງຜູ້ຕັ້ງໃຈປະຕິບັດມານດາບິດາຂອງສາມີ

(ພຣະມະຫາໂມກຄັນລານະເຖຣະຖາມວ່າ)

[໓໙໓] ເທບທິດາ ທ່ານມີຜິວພັນງາມຍິ່ງ
ເປ່ງຣັດສະໝີສະຫວ່າງສະໄຫວໄປທົ່ວທຸກທິດຢູ່ ຄືດາວປະກາຍພຶກ

[໓໙໔-໓໙໕] ຍ້ອນບຸນອັນໃດຜິວພັນທ່ານຈຶ່ງງາມແບບນີ້ ໆລໆ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແບບນີ້

[໓໙໖] ເທບທິດານັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ
ຈຶ່ງຕອບບັນຫາຜົນກຳໄປຕາມທີ່ພຣະເຖຣະຖາມວ່າ

[໓໙໗] ຂ້ານ້ອຍມີນິໄສບໍ່ຣິດສະຫຍາ ຕັ້ງໃຈປະຕິບັດແມ່ຍ່າແລະພໍ່ປູ່
ເຊິ່ງທັງດຸຮ້າຍ ໂກດງ່າຍແລະຫຍາບຄາຍ
ຈຶ່ງເປັນຜູ້ບໍ່ພະໝາດຕາມປົກກະຕິນິໄສຂອງຕົນ

[໓໙໘] ຂໍນິມົນພຣະຜູ້ເປັນເຈົ້າເບິ່ງວິມານຂອງຂ້ານ້ອຍນັ້ນ
ຂ້ານ້ອຍເປັນນາງອັບປະສອນຜູ້ມີຮູບຮ່າງແລະຜິວພັນໜ້າຮັກແພງ
ທັງຍັງເລີເລີດກວ່ານາງອັບປະສອນນັບພັນອີກດ້ວຍ
ຂໍນິມົນພຣະຜູ້ເປັນເຈົ້າເບິ່ງຜົນຂອງບຸນທັງຫຼາຍເທີ້ນ

[໓໙໙-໔໐໐] ຍ້ອນບຸນນັ້ນຜິວພັນຂ້ານ້ອຍຈຶ່ງງາມແບບນີ້ ໆລໆ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແບບນີ້

## ໑໐. ອະປະຣະກຳມະກາຣິນີວິມານ (໔)

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ຍິງຜູ້ຂົນຂວາຍຊ່ວຍເຫຼືອຜູ້ອື່ນ

(ພຣະມະຫາໂມກຄັນລານະເຖຣະຖາມວ່າ)

[໔໐໑] ເທບທິດາ ທ່ານມີຜິວພັນງາມຍິ່ງ
ເປ່ງຣັດສະໝີສະຫວ່າງສະໄຫວໄປທົ່ວທຸກທິດຢູ່ ຄືດາວປະກາຍພຶກ

[໔໐໔-໔໐໑]    ຍ້ອນບຸນອັນໃດຜິວພັນທ່ານຈຶ່ງງາມແບບນີ້ ຯລຯ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແບບນີ້

[໔໐໔]    ເທບທິດານັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ
ຈຶ່ງຕອບບັນຫາຜົນກຳໄປຕາມທີ່ພຣະເຖຣະຖາມວ່າ

[໔໐໕]    ຂ້ານ້ອຍເປັນຄົນໃຊ້ ຮັບພາຣະຊ່ອຍເຮັດວຽກໃຫ້ຄົນອື່ນສະເໝີ
ບໍ່ຂີ້ຄ້ານຕໍ່ວຽກງານທີ່ເປັນປະໂຫຍດ
ມີປົກກະຕິນິໄສບໍ່ມັກໂກດ ບໍ່ດູໝິ່ນຜູ້ອື່ນ
ມັກແບ່ງປັນສິ່ງຂອງສ່ວນໂຕແກ່ຜູ້ອື່ນ

[໔໐໖]    ຂໍນິມົນພຣະຜູ້ເປັນເຈົ້າເບິ່ງວິມານຂອງຂ້ານ້ອຍນັ້ນ
ຂ້ານ້ອຍເປັນນາງອັບປະສອນຜູ້ມີຮູບຮ່າງແລະຜິວພັນໜ້າຮັກແພງ
ທັງຍັງເລີເລີດກວ່ານາງອັບປະສອນນັບພັນອີກດ້ວຍ
ຂໍນິມົນພຣະຜູ້ເປັນເຈົ້າເບິ່ງຜົນຂອງບຸນທັງຫຼາຍເທີ້ນ

[໔໐໗-໔໐໘]    ຍ້ອນບຸນນັ້ນຜິວພັນຂ້ານ້ອຍຈຶ່ງງາມແບບນີ້ ຯລຯ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແບບນີ້

## ໑໑. ຂີໂຣທະນະທາຍິກາວິມານ

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ຍິງຜູ້ຖວາຍເຂົ້າປະສົມນົມສົດ

(ພຣະມະຫາໂມກຄັນລານະເຖຣະຖາມວ່າ)

[໔໐໙]    ເທບທິດາ ທ່ານມີຜິວພັນງາມຍິ່ງ
ເປ່ງຣັດສະໝີສະຫວ່າງສະໄຫວໄປທົ່ວທຸກທິດຢູ່ ຄືດາວປະກາຍພຶກ
[໔໑໐-໔໑໑]    ຍ້ອນບຸນອັນໃດຜິວພັນທ່ານຈຶ່ງງາມແບບນີ້ ຯລຯ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແບບນີ້

[໔໑໒]    ເທບທິດານັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ
ຈຶ່ງຕອບບັນຫາຜົນກຳໄປຕາມທີ່ພຣະເຖຣະຖາມວ່າ

[໔໑໓]    ຂ້ານ້ອຍໄດ້ຖວາຍເຂົ້າສຸກປະສົມນົມສົດ
ແດ່ພິກຂຸຜູ້ກຳລັງທ່ຽວບິນທະບາດ

ເມື່ອເຮັດກຳແນວນີ້ແລ້ວ
ຈຶ່ງເກີດໃນສຸກຄະຕິ ແຈ່ມໃສບັນເທີງໃຈຢູ່

[໔໑໔] ຂໍນິມົນພຣະຜູ້ເປັນເຈົ້າເບິ່ງວິມານຂອງຂ້ານ້ອຍນັ້ນ
ຂ້ານ້ອຍເປັນນາງອັບປະສອນຜູ້ມີຮູບຮ່າງແລະຜິວພັນໜ້າຮັກແພງ
ທັງຍັງເລີເລີດກວ່ານາງອັບປະສອນນັບພັນອີກດ້ວຍ
ຂໍນິມົນພຣະຜູ້ເປັນເຈົ້າເບິ່ງຜົນຂອງບຸນທັງຫຼາຍເທີ້ນ

[໔໑໕-໔໑໖] ຍ້ອນບຸນນັ້ນຜິວພັນຂ້ານ້ອຍຈຶ່ງງາມແນວນີ້ ฯลฯ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

(ວິມານ ໘໕ ເລື້ອງ ທີ່ຈະກ່າວຕໍ່ໄປນີ້ ມີຄວາມພິດສະດານຄືຂີໂຣທະນະທາຍິກາວິມານ)

## ໑໘. ຜານິຕະທາຍິກາວິມານ (໑)
## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ຍິງຜູ້ຖວາຍນ້ຳອ້ອຍປ່ງງ

(ພຣະມະຫາໂມກຄັນລານະເຖຣະຖາມວ່າ)

[໔໑໗-໔໑໙] ເທບທິດາ ທ່ານມີຜິວພັນງາມຍິ່ງ ฯลฯ
ເປ່ງຣັດສະໝີສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

[໔໘໐] ເທບທິດານັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ
ຈຶ່ງຕອບບັນຫາຜົນກຳໄປຕາມທີ່ພຣະເຖຣະຖາມວ່າ

[໔໘໑-໔໘໓] ຂ້ານ້ອຍໄດ້ຖວາຍນ້ຳອ້ອຍປ່ງງແດ່ພິກຂຸຜູ້ກຳລັງທ່ຽວບິນທະບາດ ฯลฯ

## ໑໙. ອຸດສຸຂັນທິກະທາຍິກາວິມານ ( ໔ )
## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ຍິງຜູ້ຖວາຍທ່ອນອ້ອຍ

[໔໘໙-໔໙໖] ຂ້ານ້ອຍໄດ້ຖວາຍທ່ອນອ້ອຍແດ່ພິກຂຸຜູ້ກຳລັງທ່ຽວບິນທະບາດ ฯลฯ

## ໑໔. ຕິມພະຣຸສະກະທາຍິກາວິມານ (໙)
## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ຍິງຜູ້ຖວາຍໝາກພັບສຸກ

[໔໙໗-໔໘໔] ຂ້ານ້ອຍໄດ້ຖວາຍໝາກພັບສຸກແດ່ພິກຂຸຜູ້ກຳລັງທ່ຽວບິນທະບາດ ฯลฯ

## ໑໕. ກັກກາຣິກະທາຍິກາວິມານ (໔)

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ຍິງຜູ້ຖວາຍໝາກແຕງກວາ

[໔໔໕-໔໕໔] ຂ້ານ້ອຍໄດ້ຖວາຍໝາກແຕງກວາແດ່ພິກຂຸຜູ້ກຳລັງທ່ຽວບິນທະບາດ ຯລຯ

## ໑໖. ເອລາລຸກະທາຍິກາວິມານ (໕)

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ຍິງຜູ້ຖວາຍໝາກອຶ

[໔໕໓-໔໗໐] ຂ້ານ້ອຍໄດ້ຖວາຍໝາກອຶແດ່ພິກຂຸຜູ້ກຳລັງທ່ຽວບິນທະບາດ ຯລຯ

## ໑໗. ວັນລິຜະລະທາຍິກາວິມານ (໖)

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ຍິງຜູ້ຖວາຍແຕງໂມ

[໔໗໑-໔໗໘] ຂ້ານ້ອຍໄດ້ຖວາຍໝາກແຕງໂມແດ່ພິກຂຸຜູ້ກຳລັງທ່ຽວບິນທະບາດ ຯລຯ

## ໑໘. ຜາຣຸສະກະທາຍິກາວິມານ (໗)

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ຍິງຜູ້ຖວາຍໝາກລິ້ນຈີ່

[໔໗໙-໔໗໖] ຂ້ານ້ອຍໄດ້ຖວາຍໝາກລິ້ນຈີ່ແດ່ພິກຂຸຜູ້ກຳລັງທ່ຽວບິນທະບາດ ຯລຯ

## ໑໙. ຫັດຖັບປະຕາປະກະທາຍິກາວິມານ (໘)

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ຍິງຜູ້ຖວາຍເຕົາຝີງ

[໔໗໗-໔໘໔] ຂ້ານ້ອຍໄດ້ຖວາຍເຕົາຝີງແດ່ພິກຂຸຜູ້ກຳລັງທ່ຽວບິນທະບາດ ຯລຯ

## ໒໐. ສາກະມຸດຖິທາຍິກາວິມານ (໙)

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ຍິງຜູ້ຖວາຍສົ້ມຜັກ

[໔໘໕-໔໙໔] ຂ້ານ້ອຍໄດ້ຖວາຍສົ້ມຜັກກຳມືໜຶ່ງແດ່ພິກຂຸຜູ້ກຳລັງທ່ຽວບິນທະບາດ ຯລຯ

## ໘໑. ປຸບຜະກະມຸດຖິທາຍິກາວິມານ (໑໐)

### ວ່າດ້ວຍວິມານທີ່ເກີດຂຶ້ນແກ່ຍິງຜູ້ຖວາຍດອກໄມ້

[໔໙໓-໕໐໐] ຂ້ານ້ອຍໄດ້ຖວາຍດອກໄມ້ກຳໜຶ່ງແດ່ພິກຂຸຜູ້ກຳລັງທ່ຽວບິນທະບາດ ຯລຯ

## ໘໒. ມູລະກະທາຍິກາວິມານ (໑໑)

### ວ່າດ້ວຍວິມານທີ່ເກີດຂຶ້ນແກ່ຍິງຜູ້ຖວາຍຫົວມັນ

[໕໐໑-໕໐໗] ຂ້ານ້ອຍໄດ້ຖວາຍຫົວມັນແດ່ພິກຂຸຜູ້ກຳລັງທ່ຽວບິນທະບາດ ຯລຯ

## ໘໓. ນິມພະມຸດຖິທາຍິກາວິມານ (໑໒ )

### ວ່າດ້ວຍວິມານທີ່ເກີດຂຶ້ນແກ່ຍິງຜູ້ຖວາຍຜັກກະເດົາ

[໕໐໘-໕໑໖] ຂ້ານ້ອຍໄດ້ຖວາຍຜັກກະເດົາກຳໜຶ່ງແດ່ພິກຂຸຜູ້ກຳລັງທ່ຽວບິນທະບາດ ຯລຯ

## ໘໔. ອຳພະກັນຊິກະທາຍິກາວິມານ (໑໓)

### ວ່າດ້ວຍວິມານທີ່ເກີດຂຶ້ນແກ່ຍິງຜູ້ຖວາຍນ້ຳສົ້ມຜັກ

[໕໑໗-໕໒ ໔] ຂ້ານ້ອຍໄດ້ຖວາຍນ້ຳສົ້ມຜັກແດ່ ພິກຂຸຜູ້ກຳລັງທ່ຽວບິນທະບາດ ຯລຯ

## ໘໕. ໂທນິນິມມັດຊະນີທາຍິກາວິມານ (໑໔)

### ວ່າດ້ວຍວິມານທີ່ເກີດຂຶ້ນແກ່ຍິງຜູ້ຖວາຍແປ້ງຖຸກງາຈືນ

[໕໒໕-໕໓໒] ຂ້ານ້ອຍໄດ້ຖວາຍແປ້ງຖຸກງາຈືນແດ່ ພິກຂຸຜູ້ກຳລັງທ່ຽວບິນທະບາດ ຯລຯ

## ໘໖. ກາຍະພັນທະນະທາຍິກາວິມານ (໑໕)
## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ຍິງຜູ້ຖວາຍສາຍແອວ

[໕໓໙-໕໔໐] ຂ້ານ້ອຍໄດ້ຖວາຍສາຍແອວແດ່ ພິກຂຸຜູ້ກຳລັງທ່ຽວບິນທະບາດ ຯລຯ

## ໘໗. ອັງສະພັດທະກະທາຍິກາວິມານ (໑໖)

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ຍິງຜູ້ຖວາຍຜ້າອັງສະ

[໕໔໑-໕໔໗] ຂ້ານ້ອຍໄດ້ຖວາຍຜ້າອັງສະແດ່ ພິກຂຸຜູ້ກຳລັງທ່ຽວບິນທະບາດ ຯລຯ

## ໘໘. ອາໂຍຄະປັດຕະທາຍິກາວິມານ (໑໗)

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ຍິງຜູ້ຖວາຍສາຍຮັດບາດ

[໕໔໘-໕໕໖] ຂ້ານ້ອຍໄດ້ຖວາຍແຜ່ນຜ້າສາຍຮັດບາດແດ່ ພິກຂຸຜູ້ກຳລັງທ່ຽວບິນທະບາດ ຯລຯ

## ໘໙. ວິທູປະນະທາຍິກາວິມານ (໑໘)

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ຍິງຜູ້ຖວາຍວີສີ່ຫຼ່ຽມ

[໕໕໗-໕໖໔] ຂ້ານ້ອຍໄດ້ຖວາຍວີສີ່ຫລ່ຽມແດ່ ພິກຂຸຜູ້ກຳລັງທ່ຽວບິນທະບາດ ຯລຯ

## ໙໐. ຕາລະປັນນະທາຍິກາວິມານ (໑໙)

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ຍິງຜູ້ຖວາຍວີໃບຕານ

[໕໖໕-໕໗໔] ຂ້ານ້ອຍໄດ້ຖວາຍວີໃບຕານແດ່ພິກຂຸຜູ້ກຳລັງທ່ຽວບິນທະບາດ ຯລຯ

## ໙໑. ໂມຣະຫັດຖະທາຍິກາວິມານ ( ໒ ໐)
## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ຍິງຜູ້ຖວາຍວີໄລ່ຍຸງ

[໕໗໓-໕໘໐] ຂ້ານ້ອຍໄດ້ຖວາຍວີໄລ່ຍຸງທີ່ເຮັດດ້ວຍຂົນນົກຍູງແດ່ພິກຂຸຜູ້ກຳລັງທ່ຽວບິນທະບາດ ຯລຯ

## ໓໒. ສັດຕະທາຍິກາວິມານ ( ໔ ໑)
## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ຍິງຜູ້ຖວາຍຄັນຮົ່ມ

[໕໗໑-໕໗໗] ຂ້ານ້ອຍໄດ້ຖວາຍຄັນຮົ່ມແດ່ພິກຂຸຜູ້ກຳລັງທ່ຽວບິນທະບາດ ຯລຯ

## ໓໓. ອຸປາຫະນະທາຍິກາວິມານ ( ໔ ໔ )

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ຍິງຜູ້ຖວາຍເກີບ

[໕໗໘-໕໘໓] ຂ້ານ້ອຍໄດ້ຖວາຍເກີບແດ່ພິກຂຸຜູ້ກຳລັງທ່ຽວບິນທະບາດ ຯລຯ

## ໓໔. ປູວະທາຍິກາວິມານ ( ໔ ໓)

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ຍິງຜູ້ຖວາຍເຂົ້າໜົມ

[໕໘໗-໖໐໔] ຂ້ານ້ອຍໄດ້ຖວາຍເຂົ້າໜົມແດ່ພິກຂຸຜູ້ກຳລັງທ່ຽວບິນທະບາດ ຯລຯ

## ໓໕. ໂມທະກະທາຍິກາວິມານ ( ໔ ໔)

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ຍິງຜູ້ຖວາຍເຂົ້າຕົ້ມ

[໖໐໕-໖໑໔] ຂ້ານ້ອຍໄດ້ຖວາຍເຂົ້າຕົ້ມແດ່ພິກຂຸຜູ້ກຳລັງທ່ຽວບິນທະບາດ ຯລຯ

## ໓໖. ລັກຂະລິກາທາຍິກາວິມານ ( ໔໕)
## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ຍິງຜູ້ຖວາຍນ້ຳຕານກ້ອນ

[໖໑໓] ຂ້ານ້ອຍໄດ້ຖວາຍນ້ຳຕານກ້ອນແດ່ພິກຂຸຜູ້ກຳລັງທ່ຽວບິນທະບາດ ຯລຯ

[໖໑໔] ຂໍນິມົນພຣະຜູ້ເປັນເຈົ້າເບິ່ງວິມານຂອງຂ້ານ້ອຍນັ້ນ
ຂ້ານ້ອຍເປັນນາງອັບປະສອນຜູ້ມີຮູບຮ່າງແລະຜິວພັນໜ້າຮັກແພງ
ທັງຍັງເລີເລີດກວ່ານາງອັບປະສອນນັບພັນອີກດ້ວຍ
ຂໍນິມົນພຣະຜູ້ເປັນເຈົ້າເບິ່ງຜົນຂອງບຸນທັງຫຼາຍເທີ້ນ

[໖໑໕-໖໑໖] ຍ້ອນບຸນນັ້ນຜິວພັນຂ້ານ້ອຍຈຶ່ງງາມແນວນີ້ ຯລຯ
ແລະມີຣັດສະໝີສະຫວ່າງສະໄຫວທົ່ວທຸກທິດແນວນີ້

(ເມື່ອເທບທິດາເຫຼົ່ານັ້ນຕອບບັນຫາຜົນກຳທີ່ໄດ້ເຮັດມາເປັນອັນດີແບບນີ້ແລ້ວ ຄຸດຕິລາຈານ ກໍ ແຈ່ມໃສບັນເທີງໃຈ ເມື່ອຈະສະແດງຄວາມຊົມຊື່ນຍິນດີຂອງຕົນຈຶ່ງກ່າວວ່າ)

[໗໑໗] ດີແທ້ນໍທີ່ຂ້ານ້ອຍໄດ້ມາໃນບ່ອນນີ້ ມື້ນີ້ເລີກງາມຍາມດີ
ຍ້ອນຂ້ານ້ອຍໄດ້ມາເຫັນເທບອັບປະສອນ
ເຊິ່ງມີຮູບຮ່າງແລະຜິວພັນທີ່ໜ້າຮັກແພງ

[໗໑໘] ຂ້ານ້ອຍໄດ້ຟັງເລື້ອງກຸສົນທຳຂອງພວກທ່ານ
ຈັກເຮັດບຸນກຸສົນໃຫ້ຫຼາຍດ້ວຍການໃຫ້ທານ
ການປະພຶດທຳສະໝ່ຳສະເໝີ
ການສັງລວມແລະການເຝິກອິນຊີ
ຂ້ານ້ອຍນັ້ນຈັກໄປສະຖານທີ່
ທີ່ຄົນທັງຫຼາຍໄປແລ້ວບໍ່ເສົ້າໂສກ

**ຄຸດຕິລະວິມານທີ ໕ ຈົບ**

# ໖. ພັດທັນລະວິມານ

## ວ່າດ້ວຍວິມານອັນຮຸ່ງເຮືອງທີ່ເກີດຂຶ້ນແກ່ຍິງຜູ້ຖວາຍສັງຄະທານ

(ພັດທະຣາເທບທິດາຜູ້ເອື້ອຍຖາມສຸພັດທະຣາເທບທິດາເຊິ່ງເປັນນ້ອງສາວວ່າ)

[໗໑໙] ທ່ານຮຸ່ງເຮືອງດ້ວຍຣັດສະໝີ ມີກຽດຕິຍົດບໍລິວານຍົດ
ມີຣັດສະໝີຮຸ່ງເຮືອງເໜືອເທບຊັ້ນຊາວຕາວະຕຶງສາທັງປວງ

[໗໒໐] ເຮົາບໍ່ເຄີຍເຫັນທ່ານ ນີ້ເປັນການເຫັນຄັ້ງທຳອິດ
ທ່ານມາຈາກເທວະໂລກຊັ້ນໃດຈຶ່ງມາຮຽກຊື່ຂອງຂ້ອຍໄດ້ຖືກ

(ສຸພັດທະຣາເທບທິດາຕອບວ່າ)

[໗໒໑] ເອື້ອຍພັດທະຣາ ເຮົາຊື່ສຸພັດທະຣາ
ເມື່ອຊາດກ່ອນຄັ້ງເປັນມະນຸດໄດ້ເປັນນ້ອງສາວຂອງເອື້ອຍ
ແລະຍັງເປັນພັນລະຍາຮ່ວມສາມີດຽວກັນກັບເອື້ອຍ

[໗໒໒] ເຮົາລະຮ່າງຈຸຕິຈາກມະນຸດສາໂລກນັ້ນແລ້ວ
ມາເກີດຮ່ວມກັບເຫຼົ່າເທບຊັ້ນນິມມານະຣະດີ

(ພັດທະຣາເທບທິດາຖາມຕໍ່ໄປອີກວ່າ)

[໖໔໓] ນ້ອງສຸພັດທະຣາ ຂໍເຈົ້າໄດ້ບອກເຖິງການເກີດຂອງຕົນ
ໃນໝູ່ເທບຊັ້ນນິມມານະຣະດີ
ເຊິ່ງເປັນທີ່ທີ່ສັດຜູ້ກະທຳຄວາມດີໄວ້ຫຼາຍແລ້ວມາເກີດ

[໖໔໔] ເຈົ້າຖືກສອນມາແນວໃດດ້ວຍເລື້ອງອັນໃດ ຫຼືວ່າໃຜສັ່ງສອນ
ເຈົ້າມີບໍລິວານຍົດໄດ້ດ້ວຍທານແລະຂໍ້ວັດປະຕິບັດອັນດີງາມແນວໃດ

[໖໔໕] ເຈົ້າໄດ້ຮັບກຽດຕິຍົດແນວນີ້ ໄດ້ຮັບສຸກໄພບູນວິເສດແນວນີ້
ນ້ອງເທບທິດາ ເອື້ອຍຖາມແລ້ວ ຂໍເຈົ້າຈົ່ງບອກ
ນີ້ເປັນຜົນຂອງກຳອັນໃດ

(ສຸພັດທະຣາເທບທິດາຕອບວ່າ)

[໖໔໖] ຊາດກ່ອນເຮົາເຫຼື້ອມໃສ ໄດ້ຖວາຍອາຫານບິນທະບາດ ໗ ທີ່
ເປັນສັງຄະທານແດ່ພຣະສົງ
ຜູ້ເປັນທັກຂິໄນຍະບຸກຄົນດ້ວຍມືທັງສອງຂອງຕົນ

[໖໔໗-໖໔໘] ຍ້ອນບຸນນັ້ນຜິວພັນເຮົາຈຶ່ງງາມແນວນີ້ ฯລฯ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

(ພັດທະຣາເທບທິດາໄດ້ຖາມຕໍ່ໄປອີກວ່າ)

[໖໔໙] ເອື້ອຍເຫຼື້ອມໃສໄດ້ຖວາຍເຂົ້ານ້ຳດ້ວຍມືຂອງຕົນ
ລ້ຽງດູພິກຂຸຜູ້ສັງລວມອິນຊີ
ປະພຶດພົມມະຈັນສະໝ່ຳສະເໝີ
ເຊິ່ງມີຈຳນວນຫຼາຍກວ່າຂອງເຈົ້າໃຫ້ອີ່ມໜຳ

[໖໕໐] ເອື້ອຍຖວາຍທານຫຼາຍກວ່າເຈົ້າ ແຕ່ກັບອຸບັດໃນໝູ່ເທບຊັ້ນຕ່ຳກວ່າ
ສ່ວນນ້ອງຖວາຍທານໜ້ອຍກວ່າ ແຕ່ເປັນຫຍັງຈຶ່ງໄດ້ຮັບສຸກໄພບູນວິເສດນໍ
ເທບທິດາ ເອື້ອຍຖາມແລ້ວ ຂໍເຈົ້າຈົ່ງບອກ ນີ້ເປັນຜົນຂອງກຳອັນໃດນໍ

(ສຸພັດທະຣາເທບທິດາຕອບວ່າ)

[໖໕໑] ຊາດກ່ອນເຮົາໄດ້ພົບພິກຂຸອົງໜຶ່ງ ໜ້າຈະເລີນໃຈ
ຈຶ່ງໄດ້ນິມົນພິກຂຸອົງນັ້ນ ຄື ພຣະເຣວະຕະ ເປັນອົງທີ ໗ ໃຫ້ສັນພັດຕາຫານ

[໖໓໔]	ພຣະເຣວະຕະເຖຣະນັ້ນມຸ້ງຈະອະນຸເຄາະໃຫ້ເກີດປະໂຫຍດແກ່ເຮົາ
ຈຶ່ງບອກເຮົາໃຫ້ຖວາຍສິ່ງ ເຮົາໄດ້ເຮັດຕາມຄຳແນະນຳຂອງທ່ານ

[໖໓໓]	ທັກຂິນາຂອງເຮົານັ້ນຖວາຍເປັນສັງຄະທານ ມີຜົນປະມານບໍ່ໄດ້
ສ່ວນທານຂອງເອື້ອຍທີ່ຖວາຍເປັນລາຍບຸກຄົນນັ້ນມີຜົນບໍ່ຫຼາຍ

(ພັດທະຣາເທບທິດາເມື່ອຈະຮັບຮອງຄວາມຂໍ້ນັ້ນຈຶ່ງກ່າວວ່າ)

[໖໓໔]	ເອື້ອຍເພິ່ງຮູ້ດ່ຽວນີ້ເອງ ທານທີ່ຖວາຍເປັນສັງຄະທານນີ້ມີຜົນຫຼາຍ
ເອື້ອຍນັ້ນ(ຫາກ)ໄປເກີດເປັນມະນຸດອີກ ຈັກຮູ້ຄວາມປະສົງຂອງຜູ້ຂໍ
ປາສະຈາກຄວາມຂີ້ຖີ່ ບໍ່ຜະໝາດ ຖວາຍສັງຄະທານຢູ່ປະຈຳ ໆ

(ເມື່ອສົນທະນາກັນແລ້ວ ສຸພັດທະຣາເທບທິດາກໍກັບໄປສູ່ທິບພະວິມານຂອງຕົນເທິງສະຫວັນຊັ້ນນິມມານະຣະດີ ທ້າວສັກກະເທວະຣາດໄດ້ສະດັບການສົນທະນານັ້ນ ເມື່ອສຸພັດທະຣາເທບທິດາກັບໄປແລ້ວຈຶ່ງຕັດຖາມພັດທະຣາເທບທິດາວ່າ)

[໖໓໕]	ພັດທະຣາ ເທບທິດາຜູ້ມາສົນທະນາຢູ່ກັບນາງນັ້ນເປັນໃຜ
ຊ່າງມີຣັດສະໝີຮຸ່ງເຮືອງເໜືອເຫຼົ່າເທບຊັ້ນຊາວຕາວະຕິງສາທັງໝົດ

(ພັດທະຣາເທບທິດາເມື່ອຈະບັນລະຍາຍຂໍ້ທີ່ສັງຄະທານທີ່ນ້ອງສາວຖວາຍວ່າມີຜົນຫຼາຍຈຶ່ງທູນວ່າ)

[໖໓໖]	ຂໍເດຊະພຣະອົງຜູ້ເປັນຈອມເທບ ເທບທິດານັ້ນ
ເມື່ອຊາດກ່ອນ ຄັ້ງເປັນມະນຸດຢູ່ໃນພົບມະນຸດ
ໄດ້ເປັນນ້ອງສາວຂອງຂ້ານ້ອຍ
ແລະຍັງເປັນພັນລະຍາຮ່ວມສາມີດຽວກັນນຳອີກ
ນາງເຮັດບຸນຖວາຍສັງຄະທານແລ້ວຈຶ່ງຮຸ່ງເຮືອງ
(ທ້າວສັກກະເທວະຣາດ ເມື່ອຈະຊົງສັນເສີນສັງຄະທານວ່າມີຜົນຫຼາຍຈຶ່ງຕັດວ່າ)

[໖໓໗]	ພັດທະຣາ ນ້ອງສາວຂອງເຈົ້າຮຸ່ງເຮືອງກວ່າເຈົ້າ
ຍ້ອນເຫດທີ່ນາງໄດ້ຖວາຍສັງຄະທານ
ເຊິ່ງມີຜົນປະມານບໍ່ໄດ້ໄວ້ໃນຊາດກ່ອນ

(ພັດທະຣາເທບທິດາໄດ້ຕອບທ້າວສັກກະວ່າ)

[໖໓໘]	ອັນແທ້ຈິງ ຂ້ານ້ອຍໄດ້ທູນຖາມພຣະພຸດທະເຈົ້າ

ຄັ້ງປະທັບຢູ່ທີ່ພູຄິດຊະກູດ
ເຖິງຜົນແຫ່ງການແຈກຈ່າຍທານວ່າ
ທານທີ່ໃຫ້ໃນເນື້ອນາບຸນໃດຈຶ່ງມີຜົນຫຼາຍ

[໖໓໙] ມະນຸດທັງຫຼາຍຜູ້ຫວັງບຸນໃຫ້ທານຢູ່
ທຳບຸນຜາຣົບເຫດແຫ່ງການວຽນວ່າຍຕາຍເກີດ
ໃຫ້ທານໃນເນື້ອນາບຸນໃດ ຈຶ່ງມີຜົນຫຼາຍ

[໖໔໐] ພຣະພຸດທະເຈົ້າຜູ້ຊົງຮູ້ວ່າ
ສັດທັງຫຼາຍມີຜົນກຳເປັນຂອງຂອງຕົນ
ໄດ້ຊົງອະທິບາຍໃຫ້ຂ້ານ້ອຍຟັງຢ່າງແຈ່ມແຈ້ງ
ເຖິງຜົນແຫ່ງການແຈກຈ່າຍທານໃນເນື້ອນາບຸນ
ທີ່ບຸກຄົນໃຫ້ແລ້ວຈະໄດ້ຮັບຜົນຫຼາຍນັ້ນວ່າ

[໖໔໑] ພຣະອະຣິຍະບຸກຄົນຜູ້ບັນລຸອະຣິຍະມັກ ໔ ແລະຜູ້ດຳລົງຢູ່ໃນອະຣິຍະຜົນ ໔
ນີ້ຄືພຣະສົງ ເປັນຜູ້ປະຕິບັດກົງ
ດຳລົງໝັ້ນຢູ່ໃນສີນ ສະມາທິ ແລະປັນຍາ

[໖໔໒] ມະນຸດທັງຫຼາຍຜູ້ຫວັງບຸນໃຫ້ທານຢູ່
ທຳບຸນຜາຣົບເຫດແຫ່ງການວຽນວ່າຍຕາຍເກີດ
ຈຶ່ງຖວາຍທານແກ່ສົງເຊິ່ງມີຜົນຫຼາຍ

[໖໔໓] ດ້ວຍວ່າ ພຣະສົງນີ້ມີຄຸນຍິ່ງໃຫຍ່ ໄພບູນ
ຫາປະມານບໍ່ໄດ້ ຄືທະເລປ່ຽມດ້ວຍນ້ຳ
ພຣະອະຣິຍະບຸກຄົນເຫຼົ່ານີ້ແລເປັນຜູ້ປະເສີດສຸດ
ເປັນສາວົກຂອງພຣະພຸດທະເຈົ້າຜູ້ມີຄວາມພຽນ
ເປັນຜູ້ໃຫ້ແສງສະຫວ່າງຄືປັນຍາແກ່ຊາວໂລກ ຍ່ອມຍົກທຳກະຖາຂຶ້ນສະແດງ

[໖໔໔] ທານທີ່ບຸກຄົນຖວາຍເຈາະຈົງສົງນັ້ນ ຊື່ວ່າເປັນທານທີ່ຖວາຍດີແລ້ວ
ບູຊາສັກກາຣະຢ່າງດີແລ້ວ ທັກຂິນາທີ່ຖວາຍສົງນັ້ນມີຜົນຫຼາຍ
ທັງພຣະສຳມາສຳພຸດທະເຈົ້າທັງຫຼາຍຜູ້ຊົງຮູ້ແຈ້ງໂລກກໍຊົງສັນເສີນແລ້ວ

[໖໔໕] ເຫຼົ່າຊົນມາຫວນຣະນຶກເຖິງບຸນແນວນີ້ໄດ້ເກີດປິຕິໂສມະນັດ
ກຳຈັດມົນທິນຄືຄວາມຂີ້ຖີ່ພ້ອມທັງມູນເຫດໄດ້

ທ່ອງທ່ຽວໄປໃນໂລກ ບໍ່ຖືກບັນດິດຕິຕຽນ
ຈຶ່ງເຂົ້າເຖິງແດນສະຫວັນໄດ້

**ທັດທັນລະວິມານທີ ໖ ຈົບ**

## ໗. ເປສະວະຕີວິມານ
## ວ່າດ້ວຍວິມານທີ່ເກີດຂື້ນແກ່ຍິງຊື່ເປສະວະດີ

(ເມື່ອພຣະວັງຄີສະເຖຣະຈະໄຕ່ຖາມເຖິງບຸບພະກຳທີ່ເທບທິດານັ້ນເຮັດແລ້ວຈຶ່ງກ່າວສັນເສີນ ວິມານຂອງນາງກ່ອນເປັນປະຖົມດ້ວຍຄາຖາ ໗ ຄາຖາວ່າ)

[໖໘໖] (ເທບທິດາ) ອາດຕະມາໄດ້ເຫັນວິມານສວຍງາມ(ຂອງທ່ານ)ນີ້
ເຊິ່ງມຸງບັງດ້ວຍແກ້ວຜຼຶກ ຕາໜ່າງເງິນແລະຕາໜ່າງຄຳ
ມີພື້ນວິຈິດຕະການຕາຫຼາກສີ ເປັນທີ່ໜ້າອອນຊອນຍິນດີ
ເປັນບ່ອນຢູ່ອາໄສອັນເນຣະມິດໄວ້ດີແລ້ວ ປະກອບດ້ວຍຊຸ້ມປະຕູ
ທີ່ລານວິມານທົ່ວແຮງໄປດ້ວຍຊາຍຄຳ

[໖໘໗] ວິມານຂອງທ່ານນີ້ສ່ອງແສງສະຫວ່າງ
ຄື ພຣະອາທິດເທິງທ້ອງຟ້າມີຣັດສະໝີເປັນພັນ
ກຳຈັດຄວາມມືດໃນລະດູສາຣະທະການ ແລະສະຫວ່າງສະໄຫວໄປທົ່ວສິບທິດ
ຄືແປວເພີງເຊິ່ງກຳລັງລຸກເປັນແປວຢູ່ເທິງຈອມພູໃນເວລາກາງຄືນ

[໖໘໘] ວິມານນີ້ເປັນຄືບາດໜ່ອຍຕາຢູ່ ຄ້າຍກັບສາຍຟ້າແມບ
ລອຍຢູ່ໃນອາກາດ ໜ້າອອນຊອນໃຈ
ວິມານທ່ານນີ້ກ້ອງກັງວານໄປດ້ວຍສຽງດົນຕີ
ຄືພິນເຄື່ອງໃຫຍ່ ກອງ ສິ່ງແລະກັງສະດານ
ຮັ່ງມີຮຸ່ງເຮືອງ ຄືເມືອງພຣະອິນ

[໖໘໙] ວິມານຂອງທ່ານນີ້ອົບອວນໄປດ້ວຍກິ່ນຫອມສົດຊື່ນ
ແຫ່ງໄມ້ຊັ້ນເລີດນານາພັນ
ໄດ້ແກ່ ດອກບົວຫຼວງ ດອກໂກມຸດ ດອກບົວ
ດອກຈົງກົນນີ ດອກຄັດເຄົ້າ ດອກຊະບາ
ດອກອັງກາບ ດອກຮັງ ດອກອະໂສກ
ແຍ້ມກີບບານເດຍລະດາດສົ່ງກິ່ນຫອມສົດຊື່ນ

[໔໕໐] ເທບທິດາຜູ້ເຮືອງຍົດ ສະໂບກຂະຣະນີໜ້າອອນຊອນ
ເດຍຣະດາດໄປດ້ວຍຕົ້ນຫູກວາງ ໝາກມີ້ສຳປະລໍແລະຕົ້ນໄມ້ມີກິ່ນຫອມ
ມີທັງໄມ້ເລືອຊູດອກອອກຊໍ່ບານເດຍລະດາດ ຫ້ອຍຍ້ອຍ
ເກາະກ່າຍລົງມາຄ້າຍກັບຕາໜ່າງແກ້ວມະນີ ຜາກົດມີຢູ່ໃກ້ວິມານທ່ານ

[໔໕໑] ບຸບຜະຊາດທີ່ເກີດໃນນ້ຳແລະເທິງບົກກໍມີ ແລະພຶກສະຊາດເຫຼົ່າອື່ນ
ທັງທີ່ເປັນຂອງມະນຸດ ແລະເປັນທິບບໍ່ແມ່ນເປັນຂອງມະນຸດກໍມີ
ທັງໝົດລ້ວນເກີດມີຢູ່ໃກ້ວິມານຂອງທ່ານ

[໔໕໒] ນີ້ເປັນຜົນແຫ່ງການສັງລວມແລະການເຝິກ[๑]ແນວໃດ
ຍ້ອນຜົນກຳອັນໃດທ່ານຈິ່ງມາເກີດໃນວິມານນີ້
ເທບທິດາ ຜູ້ມີຂົນຕາໜາງອນງາມ ຂໍທ່ານຈົ່ງເລົ່າເຖິງກຳ
ເປັນເຫດໃຫ້ທ່ານໄດ້ວິມານນີ້ຕາມທີ່ອາດຕະມາຖາມຕາມສົມຄວນ

(ລຳດັບນັ້ນ ເທບທິດາຕອບວ່າ)

[໔໕໓] ວິມານທີ່ຂ້ານ້ອຍໄດ້ແລ້ວນີ້ ມີຝູງນົກກະຮຽນ
ນົກຍູງແລະນົກເຂົາໄຟທ່ຽວບິນແສ່ວຮ້ອງໄປມາ
ທັງນົກນາງນວນແລະພະຍາຫົງຄຳເຊິ່ງເປັນນົກທິບທ່ຽວບິນແສ່ວໄປມາຢູ່
ແລະອຶງຄະນຶງໄປດ້ວຍຝູງນົກເປັດນ້ຳ ນົກການ້ຳ
ນົກກາເວົາແລະຝູງນົກປະເພດອື່ນ ໆ

[໔໕໔] ມີໄມ້ດອກແລະໄມ້ເລືອແຜ່ກິ່ງກ້ານສາຂານານາຊະນິດ
ມີຕົ້ນແຄຝອຍ ຕົ້ນຫວ້າ ຕົ້ນອະໂສກ
ຂ້ານ້ອຍຈະນໍເຫດຜົນທີ່ຂ້ານ້ອຍໄດ້ວິມານນີ້ຖວາຍພຣະຜູ້ເປັນເຈົ້າ
ພຣະຜູ້ເປັນເຈົ້າໂຜດຟັງເທີ້ນຂ້ານ້ອຍ

[໔໕໕] ຂ້າແດ່ພຣະຜູ້ເປັນເຈົ້າ ໃນຊາດກ່ອນ ຂ້ານ້ອຍໄດ້ເກີດເປັນຍິງສະໃພ້
ໃນໝູ່ບ້ານຊື່ນາລະກະຄາມ ຢູ່ທາງທິດຕາເວັນອອກ
ຂອງແຄວັນມະຄົດ ອັນຮຸ່ງເຮືອງ
ຊາວບ້ານໃນໝູ່ບ້ານນັ້ນຮູ້ຈັກຂ້ານ້ອຍໃນນາມວ່າ ເປສະວະດີ

[໔໕໖] ຂ້ານ້ອຍນັ້ນມີໃຈເບີກບານ ໄດ້ສັ່ງສົມກຸສົນກຳໄວ້ໃນຊາດປາງກ່ອນນັ້ນ
ຄືໄດ້ຫວ່ານດອກຄຳໂຮຍລົງບູຊາພຣະອຸປະຕິດສະເຖຣະ[๒]

ທີ່ທວຍເທບແລະມະນຸດພາກັນບູຊາ
ຜູ້ຫຼາຍໄປດ້ວຍກຸສົນທຳ ມີຄຸນນະທຳສຸດປະມານເຊິ່ງດັບກິເລດແລ້ວ

[໖໘໗] ເມື່ອບູຊາພຣະເຖຣະຜູ້ມີຄຸນອັນຮຸ່ງເຮືອງ ຄອງເຮືອນຮ່າງເປັນຊາດສຸດທ້າຍ
ຜູ້ບັນລຸອະນຸປາທິເສສະນິບພານແລ້ວ
ຂ້ານ້ອຍຈຶ່ງລະຮ່າງມະນຸດມາເກີດໃນສະຫວັນຊັ້ນຕາວະຕຶງສາ
ຄອບຄອງວິມານໃນເທວະໂລກນີ້

**ເປສະວະຕີວິມານທີ ໗ ຈົບ**

## ໘. ມັນລິກາວິມານ
## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ຍິງຊື່ມັນລິກາ

(ພຣະນາຣະທະເຖຣະຖາມມັນລິກາເທບທິດາວ່າ)

[໖໘໘] ເທບທິດາ ຜູ້ມີເຄື່ອງປະດັບແລະທຸງລ້ວນແຕ່ສີເຫຼືອງ
ປະດັບປະດາດ້ວຍເຄື່ອງປະດັບສີເຫຼືອງເຈີດຈ້າ
ທ່ານເຖິງຈະບໍ່ປະດັບດ້ວຍຜ້າຫົ່ມສີເຫຼືອງອະຮ່າມງາມແນວນີ້ກໍຍັງງາມ

[໖໘໙] ເທບທິດາ ຜູ້ໃສ່ເກຍູຣະຄຳ ປະດັບອຸບະຄຳ
ຄຸມເຮືອນຮ່າງດ້ວຍຕາໜ່າງຄຳ
ທ່ານຜູ້ໃສ່ຫົວດ້ວຍພວງມາໄລແກ້ວນານາຊະນິດເປັນໃຜກັນ

[໖໙໐] ມາໄລແກ້ວເຫຼົ່ານັ້ນລ້ວນສຳເລັດດ້ວຍຄຳທຳມະຊາດ
ດ້ວຍແກ້ວທັບທິມ ແກ້ວມຸກດາ ແກ້ວໄພທູນ
ບາງພວງກໍລ້ວນແລ້ວດ້ວຍແກ້ວລາຍ
ບາງອັນກໍສຳເລັດດ້ວຍແກ້ວມະນີກັບແກ້ວລາຍແດງຄ້າຍສີເລືອດ
ບາງອັນກໍສຳເລັດດ້ວຍແກ້ວແດງອັນສົດໃສຄ້າຍສີຕານົກກາງແກ

[໖໙໑] ບັນດາມາໄລເຫຼົ່ານັ້ນ ບາງພວງສົ່ງສຽງມ່ວນຄືສຽງນົກຍູງ
ບາງພວງສົ່ງສຽງມ່ວນຄືສຽງພະຍາຫົງຄຳ
ບາງພວງສົ່ງສຽງມ່ວນຄືສຽງນົກກາຣະເວກ
ສຽງມາໄລເຫຼົ່ານັ້ນມ່ວນຊວນຟັງ ຄ້າຍສຽງດົນຕີເຄື່ອງຫ້າ
ທີ່ຄົນທັນຜູ້ສະຫຼາດພາກັນບັນເລງກໍຄືກັນ

[໖໖໔] ອັນໜຶ່ງ ລົດຂອງທ່ານກໍງົດງາມຫຼາຍ ມີສ່ວນປະກອບວິຈິດບັນຈົງໄປດ້ວຍຣັດຕະນະຊາດຕ່າງ ໆ ເຊິ່ງບຸນກໍາຈັດສັນມາໃຫ້ຄົບຖ້ວນງົດງາມດ້ວຍເຄື່ອງປະກອບຫຼາກຫຼາຍ

[໖໖໖] ຍາມທ່ານຢູ່ເທິງລົດສີສຸກປັ່ງດັ່ງຄໍານັ້ນ
ພູມປະເທດນີ້ກໍສະຫວ່າງສະໄຫວໄປທົ່ວເຖິງກັນ
ເທບທິດາ ອາດຕະມາຖາມແລ້ວ ຂໍທ່ານຈົ່ງບອກເທີ້ນວ່າ
ນີ້ເປັນຜົນຂອງກໍາອັນໃດນໍ

(ມັນລິກາເທບທິດາຕອບວ່າ)

[໖໖໘] ເມື່ອພຣະສໍາມາສໍາພຸດທະເຈົ້າຊົງພຣະນາມວ່າໂຄດົມ
ຜູ້ຊົງມີພຣະກະລຸນາຫາປະມານບໍ່ໄດ້ ສະເດັດດັບຂັນທະປະຣິນິບພານແລ້ວ
ຂ້ານ້ອຍມີຈິດເຫຼື້ອມໃສ ໄດ້ໃຊ້ຕາໜ່າງຄໍາວິຈິດບັນຈົງໄປດ້ວຍແກ້ວມະນີ
ຄໍາ ແລະແກ້ວມຸກດາ ເຊິ່ງດາດາດດ້ວຍຕາໜ່າງຄໍາ ທີ່ມຄຸມພຸດທະສະຣີຣະ

[໖໖໕] ເມື່ອຂ້ານ້ອຍເຮັດກຸສົນກໍາທີ່ພຣະພຸດທະເຈົ້າຊົງສັນເສີນແລ້ວນັ້ນ
ຈຶ່ງສວ່າງໂສກ ໝົດໂລກໄພ ມີຄວາມສຸກ ມ່ວນຊື່ນບັນເທິງໃຈຢູ່ປະຈໍາ

**ມັນລິກາວິມານທີ ໙ ຈົບ**

# ໑໐. ວິສາລັກຂິວິມານ

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ນາງສຸນັນທາອຸປາສິກາຜູ້ມີຕາໃຫຍ່

(ສົມເດັດອະມະຣິນທາທິຣາດຕັດຖາມສຸນັນທາເທບທິດາວ່າ)

[໖໖໖] ເທບທິດາຜູ້ມີດວງຕາໃຫຍ່
ທ່ານມີໝູ່ນາງອັບປະສອນຫ້ອມລ້ອມ ມີຊື່ວ່າອັນໃດ
ມາທ່ຽວຍ່າງຊົມຢູ່ຮອບ ໆ ສວນຈິດລະດາອັນໜ້າອອນຊອນ

[໖໖໗] ໃນເວລາທີ່ເຫຼົ່າເທວະດາຊັ້ນຕາວະຕິງສາລ້ວນຊົງມ້າ ຊົງລົດ
ປະດັບເຄື່ອງຊົງວິຈິດງົດງາມ ພາກັນມາ ໃນບ່ອນນີ້
ເຂົ້າໄປຊົມສວນຈິດລະດານີ້

[໖໖໙] ແຕ່ເມື່ອທ່ານມາເຖິງບ່ອນນີ້ທ່ຽວຊົມສວນຢູ່
ກາຍທ່ານງາມກະທັ່ງຄວາມງາມຂອງສວນບໍ່ຜາກົດ

ຍ້ອນເຫດອັນໃດຮູບກາຍທ່ານຈຶ່ງງາມແນວນີ້
ເທບທິດາ ເຮົາຖາມແລ້ວ ຂໍທ່ານຈົ່ງບອກເທີ້ນວ່າ
ນີ້ເປັນຜົນຂອງກຳອັນໃດນໍ

(ສຸນັນທາເທບທິດາຜູ້ເປັນອັກຄະຊາຍາທູນຕອບວ່າ)

[໖໖໙] ຂ້າແດ່ ພຣະອົງຜູ້ເປັນຈອມເທບ ຜູ້ຊົງພ່ຳເພັງທານມາແຕ່ປາງກ່ອນ
ຂໍພຣະອົງໂຜດສະດັບກຳອັນເປັນເຫດໃຫ້ຂ້ານ້ອຍມີຮູບງາມ
ບັງເກີດໃນເທວະໂລກ ມີລິດແລະອານຸພາບ

[໖໗໐] ຂ້ານ້ອຍເປັນອຸປາສິກາມີນາມວ່າສຸນັນທາ
ຢູ່ໃນນະຄອນຣາດຊະຄຶ ອັນໜ້າອອນຊອນ
ເປັນຜູ້ມີສັດທາ ສົມບູນດ້ວຍສິນ ຍິນດີແຈກຈ່າຍທານຢູ່ປະຈຳ

[໖໗໑] ຂ້ານ້ອຍມີຈິດເຫຼື້ອມໃສໃນເຫຼົ່າພິກຂຸຜູ້ປະຕິບັດກົງ
ຈຶ່ງໄດ້ຖວາຍຜ້ານຸ່ງຜ້າຫົ່ມ ພັດຕາຫານ ເສນາສະນະ
ແລະເຄື່ອງເຍືອງໄຟ

[໖໗໒] ທັງໄດ້ເຂົ້າຈຳອຸໂປສົດສິນເຊິ່ງປະກອບດ້ວຍອົງ ໘
ທຸກມື້ ໑໔ ຄ່ຳ ໑໕ ຄ່ຳ ແລະ ໘ ຄ່ຳແຫ່ງປັກ
ແລະຕະຫຼອດປາຕິຫາຣິຍະປັກ

[໖໗໓] ສັງລວມລະວັງໃນສິນຕະຫຼອດເວລາ
ແລະແຈກຈ່າຍທານດ້ວຍຄວາມເຄົາລົບ
ຈຶ່ງໄດ້ຄອບຄອງວິມານນີ້

[໖໗໔] ຂ້ານ້ອຍງົດເວັ້ນຈາກການຂ້າສັດ ການລັກຂະໂມຍ
ການປະພຶດນອກໃຈສາມີ
ສັງລວມລະວັງຈາກການເວົ້າຕົວະ ແລະຈາກການດື່ມນ້ຳເມົາ

[໖໗໕] ຂ້ານ້ອຍຍິນດີໃນສິນ ໕ ສະຫຼາດໃນອະຣິຍະສັດ
ເປັນອຸປາສິກາຂອງພຣະຜູ້ມີພຣະພາກເຈົ້າຊົງພຣະນາມວ່າ ໂຄດົມ
ຜູ້ມີພຣະຈັກຂຸ ມີພຣະຍົດ

[໖໗໖] ຂ້ານ້ອຍໃຊ້ດອກໄມ້ທັງໝົດ

ທີ່ຍິງຮັບໃຊ້ນຳມາຈາກຕະກູນຍາດປະຈຳນັ້ນເອງ
ບູຊາທີ່ພຣະສະຖູບຂອງພຣະຜູ້ມີພຣະພາກເຈົ້າ

[໕໗໗] ອັນໜຶ່ງ ໃນມື້ອຸໂປສົດ ຂ້ານ້ອຍມີຈິດເຫຼື້ອມໃສ
ໄດ້ຖືມາໄລຂອງຫອມແລະເຄື່ອງລູບທາ
ໄປບູຊາທີ່ພຣະສະຖູບຂອງພຣະຜູ້ມີພຣະພາກເຈົ້ານັ້ນດ້ວຍມືທັງສອງຂອງຕົນ

[໕໗໘] ຂ້າແດ່ ພຣະອົງຜູ້ເປັນຈອມເທບ
ຍ້ອນກຳທີ່ຂ້ານ້ອຍໃຊ້ມາໄລບູຊາພຣະສະຖູບ[๑]
ຂ້ານ້ອຍຈຶ່ງມີຮູບງາມ ບັງເກີດໃນເທວະໂລກ ມີລິດແລະອານຸພາບແນວນີ້

[໕໗໙] ອັນໜຶ່ງ ການທີ່ຂ້ານ້ອຍຮັກສາສິນເປັນປົກກະຕິ
ຈະອຳນວຍຜົນພຽງທີ່ນັ້ນກໍເປັນໄປບໍ່ໄດ້
ຂ້າແດ່ພຣະອົງຜູ້ເປັນຈອມເທບ ຂ້ານ້ອຍມີຄວາມຫວັງວ່າ
ແນວໃດສາ ເຮົາເພິ່ງໄດ້ເປັນພຣະສະກະທາຄາມີ

**ວິສາລັກຂິວິມານທີ ໗ ຈົບ**

## ໑໐. ປາຣິດສັດຕະກະວິມານ

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ຍິງຜູ້ໃຊ້ມາໄລດອກອະໂສກບູຊາພຣະພຸດທະເຈົ້າ

(ພຣະມະຫາໂມກຄັນລານະເຖຣະຖາມເທບທິດາອົງໜຶ່ງວ່າ)

[໕໘໐] ເທບທິດາ ທ່ານນຳດອກໄມ້ສະຫວັນຊື່ປາຣິດສັດຕະກະ
ຫອມຫວນ ໜ້າອອນຊອນ
ມາຮ້ອຍເປັນມາໄລທິບ ຂັບຮ້ອງມ່ວນຊື່ນບັນເທີງຢູ່

[໕໘໑] ເມື່ອທ່ານນັ້ນກຳລັງຟ້ອນລຳຢູ່ ສຽງທິບໜ້າຟັງ ໜ້າອອນຊອນໃຈ
ຍ່ອມເປ່ງອອກຈາກອະໄວຍະວະນ້ອຍໃຫຍ່ທຸກສ່ວນສັດຂອງທ່ານ

[໕໘໔] ທັງກິ່ນທິບຫອມຫວນຊື່ນໃຈ
ກໍຟຸ້ງອອກຈາກອະໄວຍະວະນ້ອຍໃຫຍ່ທຸກສ່ວນສັດຂອງທ່ານ

[໕໘໕] ເມື່ອທ່ານສັ່ນໄຫວກາຍໄປມາ ສຽງເຄື່ອງປະດັບທີ່ຊ້ອງຜົມ
ກໍອອກສຽງດັ່ງມ່ວນ ໜ້າຟັງ ຄືດັ່ງສຽງດົນຕີເຄື່ອງຫ້າ

[໖໗໔] ອັນໜຶ່ງ ຕຸ້ມຫູເພັດຕ້ອງລົມສັ່ນໄຫວ ກໍສົ່ງສຽງດັງມ່ວນ
ໜ້າຟັງ ເຊັ່ນກັບສຽງດົນຕີເຄື່ອງຫ້າ

[໖໗໕] ແມ່ນມາໄລເທິງຫົວຂອງທ່ານ ມີກິ່ນຫອມຫວນຊື່ນໃຈ
ກໍສົ່ງກິ່ນຫອມຟຸ້ງໄປທົ່ວທຸກທິດ ຄືຕົ້ນອຸໂລກ[๑]

[໖໗໖] ທ່ານສູດດົມກິ່ນຫອມຫວນນັ້ນ ທັງໄດ້ເຫັນຮູບອັນບໍ່ແມ່ນຂອງມະນຸດ
ເທບທິດາ ອາດຕະມາຖາມທ່ານແລ້ວ ຂໍທ່ານຈົ່ງບອກເທີ້ນວ່າ
ນີ້ເປັນຜົນຂອງກໍາອັນໃດນໍ

(ເທບທິດານັ້ນຕອບວ່າ)

[໖໗໗] ຂ້ານ້ອຍໄດ້ນ້ອມນໍາມາໄລດອກອະໂສກເຊິ່ງມີເກສອນງາມເຫຼື້ອມປະພັດສອນ
ມີສີສົດ ມີກິ່ນຫອມຟຸ້ງ ໄປນ້ອມບູຊາພຣະພຸດທະເຈົ້າ

[໖໗໘] ຂ້ານ້ອຍນັ້ນເມື່ອເຮັດກຸສົນກໍາທີ່ພຣະພຸດທະເຈົ້າຊົງສັນເສີນແລ້ວ
ຈຶ່ງສວ່າງໂສກ ໝົດໂລກໄພ ມີຄວາມສຸກ ເບີກບານບັນເທີງໃຈຢູ່ປະຈໍາ

**ປາຣິດສັດຕະກະວິມານທີ ໑໐ ຈົບ**

## ລວມເລື້ອງວິມານທີ່ມີໃນວັກນີ້ ຄື

໑. ອຸລາຣະວິມານ
໒. ປັນລັງກະວິມານ
໓. ຄຸຕະຕິລະວິມານ
໔. ເປສະວະຕີວິມານ
໕. ວິສາລັກຂິວິມານ
໖. ອຸດສຸທາຍິກາວິມານ
໗. ລະຕາວິມານ
໘. ທັດທັນລະວິມານ
໙. ມັນລິກາວິມານ
໑໐. ປາຣິດສັດຕະກະວິມານ

**ປາຣິດສັດຕະກະວັກທີ ໒ ຈົບ**

# ໔. ມັນຊິດຖະກະວັກ

## ໝວດວ່າດ້ວຍວິມານແກ້ວຜຼືກສີແດງ

## ໑. ມັນຊິດຖະກະວິມານ

### ວ່າດ້ວຍວິມານແກ້ວຜຼືກສີແດງທີ່ເກີດຂຶ້ນແກ່ຍິງຜູ້ຖວາຍດອກສາລະ

(ພຣະມະຫາໂມກຄັນລານະເຖຣະຖາມເທບທິດາອົງໜຶ່ງວ່າ)

[໖໗໙] ເທບທິດາ ທ່ານອອນຊອນຢູ່ດ້ວຍດົນຕີເຄື່ອງຫ້າ
ທີ່ເທບພະບຸດແລະເທບທິດາບັນເລງຢູ່ຢ່າງມ່ວນ
ໃນວິມານແກ້ວຜຼືກແດງເຊິ່ງມີພື້ນເດຍລະດາດດ້ວຍຊາຍຄໍາ

[໖໙໐] ເມື່ອທ່ານລົງຈາກວິມານແກ້ວເຊິ່ງບຸນກໍາເນຣະມິດໄວ້ແລ້ວນັ້ນ
ເຂົ້າໄປສູ່ປ່າໄມ້ສາລະເຊິ່ງແຕກດອກບານເດຍລະດາດທຸກລະດູ

[໖໙໑] ຢືນທີ່ເຫງົ້າຕົ້ນສາລະໃດ ໆ ກໍຕາມ
ຕົ້ນສາລະນັ້ນ ໆ ເຊິ່ງເປັນຕົ້ນໄມ້ອຸດົມສົມບູນ ກໍນ້ອມງ່າໂຮຍດອກລົງມາ

[໖໙໔] ປ່າໄມ້ສາລະເປັນບ່ອນອາໄສຂອງເຫຼົ່າສະກຸນະຊາດ
ຕ້ອງລົມລໍາເພີຍພັດໄຫວໄປມາ
ມີກິ່ນຫອມຟຸ້ງໄປທົ່ວທຸກທິດ ຄືຕົ້ນອຸໂລກ

[໖໙໓] ທ່ານສູດດົມກິ່ນທີ່ຫອມຫວນນັ້ນ ທັງໄດ້ເຫັນຮູບອັນບໍ່ແມ່ນຂອງມະນຸດ
ເທບທິດາ ອາດຕະມາຖາມແລ້ວ ຂໍທ່ານຈົ່ງບອກເທີ້ນວ່າ
ນີ້ເປັນຜົນຂອງກໍາອັນໃດນໍ

(ເທບທິດາຕອບວ່າ)

[໖໙໔] ເມື່ອຂ້ານ້ອຍເກີດເປັນມະນຸດຢູ່ໃນໝູ່ມະນຸດ
ເປັນຍິງຮັບໃຊ້ຢູ່ໃນຕະກູນຫົວໜ້າ
ໄດ້ເຫັນພຣະພຸດທະເຈົ້າປະທັບນັ່ງຢູ່
ຈຶ່ງໄດ້ໂຮຍດອກສາລະລົງ (ຮອບພຣະອາດ)

[໘໘໕]	ແລະມີຈິດເຫຼື້ອມໃສ ໄດ້ນ້ອມພວງມາໄລດອກສາລະ
ເຊິ່ງປະດິດໄວ້ຢ່າງດີ
ເຂົ້າໄປຖວາຍພຣະພຸດທະເຈົ້າດ້ວຍມືທັງສອງຂອງຕົນ

[໘໘໖]	ເມື່ອຂ້ານ້ອຍເຮັດກຸສົນກຳທີ່ພຣະພຸດທະເຈົ້າຊົງສັນເສີນແລ້ວນັ້ນ
ຈຶ່ງສວ່າງໂສກ ໝົດໂລກໄພ
ມີຄວາມສຸກ ເບີກບານ ບັນເທີງໃຈຢູ່ປະຈຳ

**ມັນຊິຕະຖະກະວິມານທີ ໑ ຈົບ**

## ໔. ປະພັດສອນວິມານ

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ເທບທິດາຜູ້ງາມຜຸດຜ່ອງ

(ພຣະມະຫາໂມກຄັນລານະເຖຣະຖາມເທບທິດາອົງໜຶ່ງວ່າ)

[໘໘໗]	ເທບທິດາຜູ້ມີຣັດສະໝີງາມຜຸດຜ່ອງ
ຊົງເຄື່ອງປະດັບສີແດງສົດໃສ ມີລິດຫຼາຍ
ມີຮ່າງກາຍສວຍງາມຄືລູບທາດ້ວຍຈຸນແກ່ນຈັນ
ທ່ານເປັນໃຜມາໄຫວ້ອາດຕະມາຢູ່

[໘໘໘]	ອັນໜຶ່ງ ທ່ານນັ່ງເທິງບັນລັງທີ່ມີຄ່າຫຼາຍ
ງາມວິຈິດດ້ວຍຣັດຕະນະຫຼາກຫຼາກ
ຍ່ອມຮຸ່ງເຮືອງດັ່ງທ້າວສັກກະເທວະຣາດໃນນັນທະວະໂນທະຍານ

[໘໘໙]	ເທບທິດາຜູ້ຈະເລີນ ຊາດກ່ອນທ່ານໄດ້ປະພຶດສຸດຈະຣິດອັນໃດ
ໄດ້ສະເຫວີຍຜົນກຳອັນໃດໃນເທວະໂລກ ອາດຕະມາຖາມແລ້ວ
ຂໍທ່ານຈົ່ງບອກເທີ້ນວ່າ ນີ້ເປັນຜົນຂອງກຳອັນໃດນໍ

(ເທບທິດາຕອບວ່າ)

[໑໐໐]	ພຣະຜູ້ເປັນເຈົ້າຜູ້ຈະເລີນ ຂ້ານ້ອຍໄດ້ຖວາຍພວງມາໄລ
ແລະນ້ຳອ້ອຍປ່ຽງແດ່ພຣະຜູ້ເປັນເຈົ້າເຊິ່ງກຳລັງທ່ຽວບິນທະບາດ
ຂ້ານ້ອຍຈຶ່ງໄດ້ສະເຫວີຍຜົນຂອງກຳນັ້ນໃນເທວະໂລກ

[໑໐໑]	ພຣະຜູ້ເປັນເຈົ້າຜູ້ຈະເລີນ ແຕ່ຂ້ານ້ອຍຍັງມີຄວາມເດືອດຮ້ອນ

ຜິດຫວັງແລະເປັນທຸກ
ຍ້ອນຂ້ານ້ອຍນັ້ນບໍ່ໄດ້ຟັງທຳທີ່ພຣະສຳມາສຳພຸດທະເຈົ້າ
ຜູ້ເປັນພຣະທຳຣາຊາຊົງສະແດງໄວ້ດີແລ້ວ

[ກ໐໔] ພຣະຜູ້ເປັນເຈົ້າຜູ້ຈະເລີນ ຍ້ອນເຫດນັ້ນ
ຂ້ານ້ອຍຈຶ່ງຂາບຮຽນພຣະຜູ້ເປັນເຈົ້າເຊິ່ງເປັນຜູ້ຄວນອະນຸເຄາະຂ້ານ້ອຍ
ຂໍພຣະຜູ້ເປັນເຈົ້າຈົ່ງໃຫ້ຂ້ານ້ອຍຕັ້ງໝັ້ນຢູ່ໃນທຳທັງຫຼາຍດ້ວຍເທີ້ນ

[ກ໐໕] (ດ້ວຍວ່າ) ເຫຼົ່າເທບທີ່ມີຄວາມເຊື່ອໃນພຣະພຸດທະຣັດຕະນະ
ພຣະທຳມະຣັດຕະນະ ແລະພຣະສັງຄະຣັດຕະນະ
ສະດັບທຳທີ່ພຣະສຳມາສຳພຸດທະເຈົ້າ
ຜູ້ເປັນພຣະທຳຣາຊາຊົງສະແດງໄວ້ດີແລ້ວ
ຍ່ອມຮຸ່ງເຮືອງຍິ່ງກວ່າຂ້ານ້ອຍດ້ວຍອາຍຸ ບໍລິວານ ຍົດແລະສິຣິ

[ກ໐໔] ເທບເຫຼົ່າອື່ນ ກໍມີຄຸນສົມບັດຍວດຍິ່ງກວ່າຂ້ານ້ອຍດ້ວຍອານຸພາບ
ດ້ວຍຣັດສະໝີກາຍ ແລະມີລິດຫຼາຍຍິ່ງກວ່າຂ້ານ້ອຍທັ້ງຫຼາຍ

**ປະພັດສອນວິມານທີ ໘ ຈົບ**

## ໙. ນາຄະວິມານ

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ຍິງຜູ້ຖວາຍຜ້າຄູ່ໜຶ່ງແດ່ພຣະພຸດທະເຈົ້າ

(ພຣະວັງຄີສະເຖຣະຖາມເທບທິດາອົງໜຶ່ງວ່າ)

[ກ໐໕] ທ່ານປະດັບອົງຊົງເຄື່ອງແລ້ວ
ຂຶ້ນຄົດຊະສານໂຕປະເສີດ ມີຮ່າງກາຍໃຫຍ່
ປະດັບແກ້ວແລະຄຳ ມີຕາໜ່າງຄຳຄຸມກະພອງ
ມັດສາຍຣັດປຜະສົມຄຳໄວ້ຮຽບຮ້ອຍ ນັ່ງຫຼັງຄົດຊະສານເຫາະມາບ່ອນນີ້

[ກ໐໖] ທີ່ງາທັງສອງຂອງພະຍາຄົດຊະສານລ້ວນມີສະໂບກຂະຣະນີເນຣະມິດ
ມີນ້ຳໃສສະອາດ ເດຍລະດາດດ້ວຍປະທຸມະຊາດມີດອກບານເດຍລະດາດ
ໃນດອກບົວຫຼວງທຸກດອກ ໆ ມີໝູ່ດຸຣິຍະເທບບັນເລງເພງ
ແລະມີເຫຼົ່າເທບອັບປະສອນນີ້ຟ້ອນລຳຊວນໃຫ້ເກີດຄວາມມ່ວນຊື່ນບັນເທີງໃຈ

[໗໐໗] ເທບທິດາຜູ້ມີອານຸພາບຫຼາຍ ທ່ານໄດ້ບັນລຸເທວະລິດ
ເມື່ອທ່ານເກີດເປັນມະນຸດໄດ້ເຮັດບຸນອັນໃດໄວ້
ຍ້ອນບຸນອັນໃດ ທ່ານຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

(ເທບທິດາຕອບວ່າ)

[໗໐໘] ຂ້ານ້ອຍໄດ້ເຂົ້າໄປເຝົ້າພຣະພຸດທະເຈົ້າທີ່ນະຄອນພາຣານະສີ
ໄດ້ຖວາຍຜ້າຄູ່ໜຶ່ງແດ່ພຣະອົງ
ຖວາຍອະພິວາດພຣະບາດທັງສອງແລ້ວນັ່ງຢູ່ເທິງພື້ນດິນ
ມີຈິດຍິນດີໄດ້ກະທຳອັນຊະລີແດ່ພຣະອົງແລ້ວ

[໗໐໙] ອັນໜຶ່ງ ພຣະພຸດທະເຈົ້າຊົງມີພຣະສະຫວີວັນຄືຄຳທຳມະຊາດ
ໄດ້ຊົງສະແດງທຸກຂະສັດແລະສະມຸໄທຍະສັດວ່າເປັນສະພາວະບໍ່ທ່ຽງ
ແລະຊົງສະແດງທຸກຂະນິໂຣທະສັດແລະມັກຄະສັດ
ວ່າເປັນສະພາວະອັນປັດໄຈອັນໃດ ໆ ປຸງແຕ່ງບໍ່ໄດ້ແລ້ວແກ່ຂ້ານ້ອຍ
ຍ້ອນແນວນັ້ນ ຂ້ານ້ອຍຈຶ່ງໄດ້ຮູ້ແຈ່ມແຈ້ງອະຣິຍະສັດ ໔

[໗໑໐] ຂ້ານ້ອຍເຖິງແກ່ກຳຕັ້ງແຕ່ອາຍຸຍັງນ້ອຍ
ເຄື່ອນຈາກອັດຕະພາບນັ້ນແລ້ວ
ບັງເກີດໃນໝູ່ເທບຊັ້ນຕາວະຕຶງສາ ມີບໍລິວານຍົດ
ເປັນປະຊາບໍດີອົງໜຶ່ງຂອງທ້າວສັກກະ
ມີນາມວ່າຍະສຸດຕະຣາ ຜາກົດໄປທົ່ວທຸກທິດ

**ນາຄະວິມານທີ ໓ ຈົບ**

# ໔. ອະໂລມະວິມານ

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ນາງອະໂລມາຜູ້ຖວາຍເຂົ້າໜົມກຸມາດແຫ້ງ

(ພຣະມະຫາໂມກຄັນລານະເຖຣະຖາມເທບທິດາອົງໜຶ່ງວ່າ)

[໗໑໑] ເທບທິດາ ທ່ານມີຜິວພັນງາມຍິ່ງ
ເປ່ງຣັດສະໝີສະຫວ່າງສະໄຫວໄປທົ່ວທຸກທິດ ຄືດາວປະກາຍພຶກ

[ກ໑໔ -ກ໑໖] ຍ້ອນບຸນອັນໃດຜິວພັນທ່ານຈຶ່ງງາມແນວນີ້ ຯລຯ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

[ກ໑໔] ເທບທິດານັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ
ຈຶ່ງຕອບບັນຫາຜົນກຳໄປຕາມທີ່ພຣະເຖຣະຖາມວ່າ

[ກ໑໕] ຂ້ານ້ອຍເມື່ອຢູ່ໃນນະຄອນພາຣານະສີ ມີຈິດເຫຼື້ອມໃສ
ໄດ້ຖວາຍເຂົ້າໜົມກຸມມາດແຫ້ງແດ່ພຣະພຸດທະເຈົ້າ
ຜູ້ຊົງເປັນເຜົ່າພັນພຣະອາທິດດ້ວຍມືທັງສອງຂອງຕົນ

[ກ໑໖] ຂໍພຣະຜູ້ເປັນເຈົ້າຈົ່ງເບິ່ງຜົນກ້ອນເຂົ້າໜົມກຸມມາດແຫ້ງທັງຫາຣົດເຄັມບໍ່ໄດ້
ເມື່ອເຫັນວ່າຖວາຍເຂົ້າໜົມກຸມມາດແຫ້ງຫາຣົດເຄັມບໍ່ໄດ້ແລ້ວ
ໄດ້ຮັບຄວາມສຸກ ໃຜນໍຈັກບໍ່ເຮັດບຸນ

[ກ໑໗-ກ໑໘] ຍ້ອນບຸນນັ້ນຜິວພັນຂ້ານ້ອຍຈຶ່ງງາມແນວນີ້ ຯລຯ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

**ອະໂລນະວິມານທີ ໔ ຈົບ**

# ໕. ກັນຊິກະທາຍິກາວິມານ

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ຍິງຜູ້ຖວາຍນ້ຳເຂົ້າປຸງປະສົມໝາກກະທັນອົບ

(ພຣະມະຫາໂມກຄັນລານະເຖຣະຖາມເທບທິດາອົງໜຶ່ງວ່າ)

[ກ໑໙] ເທບທິດາ ທ່ານມີຜິວພັນງາມຍິ່ງ
ເປ່ງຣັດສະໝີສະຫວ່າງສະໄຫວໄປທົ່ວທຸກທິດຢູ່ ຄືດາວປະກາຍພຶກ

[ກ໒໐-ກ໒໑] ຍ້ອນບຸນອັນໃດທ່ານຈຶ່ງມີຜິວພັນງາມແນວນີ້ ຯລຯ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

[ກ໒໒] ເທບທິດານັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ
ຈຶ່ງຕອບບັນຫາຜົນກຳໄປຕາມທີ່ພຣະເຖຣະຖາມວ່າ

[ກ໒໓] ຂ້ານ້ອຍເມື່ອຢູ່ໃນເມືອງອັນທະກະວິນທະ
ໄດ້ຖວາຍນ້ຳເຂົ້າປຸງດ້ວຍໝາກກະທັນອົບດ້ວຍນ້ຳມັນ

ແດ່ພຣະພຸດທະເຈົ້າຜູ້ຊົງເປັນເຜົ່າພັນແຫ່ງພຣະອາທິດ

[໗໔໔] ມີຈິດເຫຼື້ອມໃສໃນພຣະຜູ້ມີພຣະພາກເຈົ້າຜູ້ປະຕິບັດກົງ
ໄດ້ຖວາຍນ້ຳເຂົ້າປະສົມດ້ວຍດີປີ ກະທຽມ ແລະຣາກຜັກຊີ

[໗໔໕] ການທີ່ນາຣີຜູ້ມີເຮືອນຮ່າງງາມທຸກສ່ວນສັດ ສາມີແນມບໍ່ເບື່ອ
ໄດ້ຄອງຄວາມເປັນອັກຄະຣະມະເຫສີຂອງພຣະເຈົ້າຈັກກະພັດນັ້ນ
ຍັງບໍ່ທຽບທໍ່ສ້ຽວທີ ໑໖ ແຫ່ງການຖວາຍນ້ຳເຂົ້າເທື່ອດຽວ

[໗໔໖] ຄຳ ໑໐໐ ແທ່ງ ມ້າ ໑໐໐ ໂຕ
ຣາດຊະລົດທຽມດ້ວຍມ້າອັດສະດອນ ໑໐໐ ຄັນ
ຍິງສາວປະດັບຕຸ້ມຫູແກ້ວມະນີ ໑໐໐,໐໐໐ ນາງ
ກໍຍັງມີຄ່າບໍ່ເຖິງສ້ຽວທີ ໑໖ ແຫ່ງທານຄືການຖວາຍນ້ຳເຂົ້າເທື່ອດຽວ

[໗໔໗] ຊ້າງມາຕັງຄະ ໑໐໐ ເຊືອກ ເກີດໃນປ່າຫິມະພານ
ມີງາງອນງາມ ຊົງພະລັງຫຼາຍ ມີສາຍຄ້ອງຄໍຄຳ
ຕົກແຕ່ງດ້ວຍເຄື່ອງປູລາດແລະເຄື່ອງປະດັບທີ່ວິຈິດບັນຈົງດ້ວຍຄຳ
ກໍຍັງມີຄ່າບໍ່ເຖິງສ້ຽວທີ ໑໖ ຂອງການຖວາຍນ້ຳເຂົ້າເທື່ອດຽວ

[໗໔໘] ການທີ່ພຣະເຈົ້າຈັກກະພັດໄດ້ຄອບຄອງທະວີບທັງ ໔ ໃນໂລກນີ້ນັ້ນ
ກໍຍັງມີຄ່າບໍ່ເຖິງສ້ຽວທີ ໑໖ ແຫ່ງການຖວາຍນ້ຳເຂົ້າເທື່ອດຽວນັ້ນ

**ກັນຊິກະທາຍິກາວິມານທີ ໕ ຈົບ**

# ໖. ວິຫາຣະວິມານ

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ຍິງຜູ້ອະນຸໂມທະນາການຖວາຍວິຫານ

(ພຣະອະນຸຣຸດທະເຖຣະຖາມເທບທິດາອົງໜຶ່ງວ່າ)

[໗໔໙] ເທບທິດາ ທ່ານມີຜິວພັນງາມຍິ່ງ
ເປ່ງຣັດສະໝີສະຫວ່າງສະໄຫວໄປທົ່ວທຸກທິດຢູ່ ຄືດາວປະກາຍພຶກ

[໗໕໐] ເມື່ອທ່ານນັ້ນກຳລັງຟ້ອນລຳຢູ່ ສຽງທິບໜ້າຟັງ ໜ້າອອນຊອນໃຈ
ຍ່ອມເປ່ງອອກຈາກອະໄວຍະວະນ້ອຍໃຫຍ່ທຸກສ່ວນສັດຂອງທ່ານ

[ກ໓໑]	ທັງກິ່ນທິບຫອມຫວນຊື່ນໃຈ
ກໍຟຸ້ງອອກຈາກອະໄວຍະວະນ້ອຍໃຫຍ່ທຸກສ່ວນສັດຂອງທ່ານ

[ກ໓໔]	ເມື່ອທ່ານສັ່ນໄຫວກາຍໄປມາ
ສຽງເຄື່ອງປະດັບທີ່ຊ້ອງຜົມ(ຂອງທ່ານ)ທຸກສ່ວນ
ກໍອອກສຽງດັງມ່ວນ ໜ້າຟັງ ດັ່ງສຽງດົນຕີເຄື່ອງຫ້າ

[ກ໓໓]	ອັນໜຶ່ງ ຕຸ້ມຫູເພັດຕ້ອງລົມສັ່ນໄຫວ ກໍສົ່ງສຽງດັງມ່ວນ
ໜ້າຟັງ ດັ່ງສຽງດົນຕີເຄື່ອງຫ້າ

[ກ໓໔]	ແມ່ນມາໄລເທິງຫົວຂອງທ່ານ ມີກິ່ນຫອມຊື່ນໃຈ
ກໍສົ່ງກິ່ນຫອມຟຸ້ງໄປທົ່ວທຸກທິດ ຄືຕົ້ນອຸໂລກ

[ກ໓໕]	ທ່ານສູດດົມກິ່ນຫອມນັ້ນ ທັງໄດ້ເຫັນຮູບອັນບໍ່ແມ່ນຂອງມະນຸດ
ເທບທິດາ ອາດຕະມາຖາມແລ້ວ ຂໍທ່ານຈົ່ງບອກເຫິ້ນວ່າ
ນີ້ເປັນຜົນຂອງກຳອັນໃດນໍ

(ເທບທິດານັ້ນຕອບວ່າ)

[ກ໓໖]	ພຣະຜູ້ເປັນເຈົ້າຜູ້ຈະເລີນ ນາງວິສາຂາມະຫາອຸປາສິກາ
ສະຫາຍຂອງຂ້ານ້ອຍຢູ່ໃນນະຄອນສາວັດຖີ
ໄດ້ຈັດສ້າງມະຫາວິຫານຖວາຍສົງ ຂ້ານ້ອຍໄດ້ເຫັນອາຄານ
ແລະການບໍລິຈາກຊັບຈຳນວນຫຼາຍອຸທິດສົງ
ເປັນທີ່ພໍໃຈຂອງຂ້ານ້ອຍເຊັ່ນນັ້ນ ຈຶ່ງເຫຼື້ອມໃສແລ້ວອະນຸໂມທະນາໃນບຸນນັ້ນ

[ກ໓໗]	ວິມານໜ້າອັດສະຈັນ ໜ້າທັດສະນາ ເຊິ່ງຂ້ານ້ອຍໄດ້ມາ
ຍ້ອນການອະນຸໂມທະນານຳແນວດຽວທໍ່ນັ້ນ
ວິມານນັ້ນລ່ອງລອຍໄປໄດ້ໂດຍຮອບ
ໃນຣັດສະໝີ ໑໖ ໂຍດດ້ວຍບຸນລິດຂອງຂ້ານ້ອຍ

[ກ໓໘]	ວິມານເຮືອນຍອດຂອງຂ້ານ້ອຍ ຈັດແບ່ງໄວ້ແຕ່ລະສ່ວນຢ່າງເໝາະສົມ
ສ່ອງສະຫວ່າງຮຸ່ງເຮືອງ ຕະຫຼອດຣັດສະໝີ ໑໐໐ ໂຍດໂດຍຮອບ

[ກ໓໙]	ອັນໜຶ່ງ ທີ່ວິມານຂອງຂ້ານ້ອຍນີ້ ມີສະໂບກຂະຣະນີ
ເຊິ່ງໝູ່ມັດສາທິບອາໄສຢູ່ປະຈຳ

ມີນ້ຳໃສສະອາດ ມີພື້ນເດຍລະດາດດ້ວຍຊາຍຄຳ

[໑໔໐] ດາດດື່ນດ້ວຍບົວຫຼວງຫຼາຍຊະນິດ ມີບົວຂາວຫ້ອມລ້ອມໄວ້ຮອບ
ຍາມລົມລຳເພຍພັດກໍໂຊຍກິ່ນຫອມຫວນຈູງໃຈ

[໑໔໑] ມີຣຸກຂະຊາດນານາຊະນິດ ຄືຕົ້ນຫວ້າ ຕົ້ນໝາກມີ້ ຕົ້ນຕານ ຕົ້ນໝາກພ້າວ
ແລະປ່າໄມ້ເກີດເອງຕາມທຳມະຊາດ ພາຍໃນນິເວດ ບໍ່ໄດ້ມີໃຜປູກໄວ້

[໑໔໒] ວິມານນີ້ກໍກ້ອງໄປດ້ວຍດົນຕີຊະນິດຕ່າງ ໆ
ເຫຼົ່າເທບອັບປະສອນກໍສີ່ງສຽງເຈື້ອຍແຈ້ວ
ແມ່ນນໍຣະຊົນທີ່ຝັນເຫັນຂ້ານ້ອຍແລ້ວຕ້ອງພໍໃຈ

[໑໔໓] ວິມານໜ້າອັດສະຈັນ ໜ້າທັດສະນາ
ມີຣັດສະໝີສະຫວ່າງສະໄຫວໄປທຸກທິດ ແນວນີ້
ບັງເກີດຍ້ອນກຸສົນກຳຂອງຂ້ານ້ອຍ
(ດັ່ງນັ້ນ)ຈຶ່ງ ຄວນແທ້ທີ່ສາທຸຊົນຈະເຮັດບຸນໄວ້

(ພຣະອະນຸຣຸດທະເຖຣະປະສົງ ຈະໃຫ້ນາງບອກສະຖານທີ່ທີ່ນາງວິສາຂາເກີດຈຶ່ງໄດ້ກ່າວຄາຖານີ້ວ່າ)

[໑໔໔] ທ່ານໄດ້ວິມານໜ້າອັດສະຈັນ ໜ້າທັດສະນາ
ຍ້ອນການອະນຸໂມທະນານຳແນວດຽວທີ່ນັ້ນ
ຂໍທ່ານຈົ່ງບອກຄະຕິຂອງນາງວິສາຂາ
ຜູ້ທີ່ໄດ້ຖວາຍທານນັ້ນເທີ້ນວ່າ ນາງເກີດ ຢູ່ໃສ

(ເທບທິດານັ້ນຕອບວ່າ)

[໑໔໕] ພຣະຜູ້ເປັນເຈົ້າຜູ້ຈະເລີນ
ນາງວິສາຂາມະຫາອຸປາສິກາສະຫາຍຂອງຂ້ານ້ອຍນັ້ນ
ໄດ້ສ້າງມະຫາວິຫານຖວາຍສົງ ຮູ້ແຈ້ງທຳ ໄດ້ຖວາຍທານ
ເກີດແລ້ວໃນໝູ່ທວຍເທບຊັ້ນນິມມານະຣະດີ

[໑໔໖] ເປັນປະຊາບໍດີຂອງທ້າວສຸນິມມິດເທວະຣາຊະນັ້ນ
ວິບາກແຫ່ງກຳຂອງນາງເປັນເລື້ອງທີ່ໃຜ ໆ ບໍ່ເພິ່ງຄິດ
ຂ້ານ້ອຍໄດ້ຊີ້ແຈ່ງເຖິງຄຳຖາມທີ່ພຣະຜູ້ເປັນເຈົ້າຖາມ

ເຖິງທີ່ທີ່ນາງເກີດແດ່ພຣະຜູ້ເປັນເຈົ້າແລ້ວຕາມຄວາມເປັນຈິງ

[໑໔໗] ຖ້າເປັນແນວນັ້ນ ຂໍນິມົນພຣະຜູ້ເປັນເຈົ້າໂຜດຊັກຊວນແມ່ນຄົນອື່ນ ໆ ວ່າ
ທ່ານທັງຫຼາຍຈົ່ງເຕັມໃຈຖວາຍທານແດ່ສົງເທີ້ນ
ແລະຈົ່ງມີໃຈເຫຼື້ອມໃສຟັງທໍາ
ການໄດ້ເກີດເປັນມຸດທີ່ໄດ້ແສນຍາກ ພວກທ່ານກໍໄດ້ແລ້ວ

[໑໔໘] ພຣະພຸດທະເຈົ້າມີພຣະສຸຣະສຽງມ່ວນດັ່ງສຽງພິນ
ມີພຣະສະຫວີວັນຜຸດຜ່ອງດັ່ງຄໍາ ຜູ້ຊົງເປັນໃຫຍ່ຍິ່ງດ້ວຍມັກ໌
ໄດ້ຊົງສະແດງທານໃດວ່າເປັນທາງ(ໄປສູ່ສຸກຄະຕິ)
ຂໍທ່ານທັງຫຼາຍຈົ່ງເຕັມໃຈຖວາຍທານນັ້ນແດ່ສົງ
ເຊິ່ງເປັນບຸນຍະເຂດທີ່ທັກຂິນາທານມີຜົນຫຼາຍເທີ້ນ

[໑໔໙] ທັກຂິໄນຍະບຸກຄົນ ໔ ຄູ່ ໘ ທ່ານເຫຼົ່ານີ້ທີ່ທ່ານຜູ້ຮູ້ສັນເສີນແລ້ວ
ເປັນສາວົກຂອງພຣະສຸຄົດເຈົ້າ ທານທີ່ຖວາຍໃນບຸກຄົນເຫຼົ່ານີ້ມີຜົນຫຼາຍ

[໑໕໐] ພຣະອະຣິຍະບຸກຄົນຜູ້ບັນລຸອະຣິຍະມັກ ໔
ແລະຜູ້ດໍາລົງຢູ່ໃນອະຣິຍະຜົນ ໔ ນີ້
ຈັດເປັນພຣະສົງ ເປັນຜູ້ປະຕິບັດກົງ
ດໍາລົງໝັ້ນຢູ່ໃນສີນ ສະມາທິ ແລະປັນຍາ

[໑໕໑] ມະນຸດທັງຫຼາຍຜູ້ຫວັງບຸນໃຫ້ທານຢູ່
ທໍາບຸນຜາຣົບເທດແຫ່ງການວຽນວ່າຍຕາຍເກີດ
ຈຶ່ງຖວາຍທານແກ່ສົງເຊິ່ງມີຜົນຫຼາຍ

[໑໕໒] ດ້ວຍວ່າ ພຣະສົງນີ້ມີຄຸນຍິ່ງໃຫຍ່ ໄພບູນ
ຫາປະມານບໍ່ໄດ້ ຄືທະເລປຽມດ້ວຍນໍ້າ
ພຣະອະຣິຍະບຸກຄົນເຫຼົ່ານີ້ແລເປັນຜູ້ປະເສີດສຸດ
ເປັນສາວົກຂອງພຣະພຸດທະເຈົ້າຜູ້ມີຄວາມພຽນ
ເປັນຜູ້ໃຫ້ແສງສະຫວ່າງຄືປັນຍາແກ່ຊາວໂລກ ຍ່ອມຍົກທໍາຂຶ້ນສະແດງ

[໑໕໓] ທານທີ່ບຸກຄົນຖວາຍເຈາະຈົງສົງນັ້ນຊື່ວ່າເປັນທານທີ່ຖວາຍດີແລ້ວ
ບູຊາສັກກາຣະດ້ວຍດີແລ້ວ ທັກຂິນາທີ່ຖວາຍໃນສົງນັ້ນມີຜົນຫຼາຍ
ທັງພຣະສໍາມາສໍາພຸດທະເຈົ້າທັງຫຼາຍຜູ້ຊົງຮູ້ແຈ້ງໂລກກໍຊົງສັນເສີນແລ້ວ

[໗໔໔] ເຫຼົ່າຊົນມາຫວນຣະນຶກເຖິງບຸນແນວນີ້ໄດ້ເກີດປີຕິໂສມະນັດ
ກຳຈັດມົນທິນຄືຄວາມຂີ້ຖີ່ພ້ອມທັງມູນເຫດໄດ້
ທ່ອງທ່ຽວໄປໃນໂລກ ບໍ່ຖືກບັນດິດຕິຕຽນ ຈຶ່ງເຂົ້າເຖິງແດນສະຫວັນໄດ້

**ວິຫາຣະວິມານທີ ໖ ຈົບ**

**ພານະວານທີ ໔ ຈົບ**

## ໗. ຈະຕຸຣິດຖີວິມານ

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ຍິງ ໔ ນາງຜູ້ຖວາຍດອກໄມ້ຕ່າງຊະນິດກັນ

(ພຣະມະຫາໂມກຄັນລານະເຖຣະຖາມເທບທິດາອົງໜຶ່ງວ່າ)

[໗໕໕-໗໕໗] ເທບທິດາ ຍ້ອນບຸນອັນໃດທ່ານຈຶ່ງມີຜິວພັນງາມຍິ່ງ ຯລຯ
ແລະມີຣັດສະໝີສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

[໗໕໘] ເທບທິດານັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ
ຈຶ່ງຕອບບັນຫາຜົນກຳໄປຕາມທີ່ພຣະເຖຣະຖາມວ່າ

[໗໕໙] ຊາດກ່ອນ ຂ້ານ້ອຍໄດ້ຖວາຍດອກຣາຊະພຶກ^ກຳມືໜຶ່ງ
ແດ່ພິກຂຸຜູ້ກຳລັງທ່ຽວບິນທະບາດໃນປັນນະກະຕະນະຄອນເຊິ່ງຕັ້ງຢູ່ເທິງເນີນ
ເປັນເມືອງທີ່ຮຸ່ງເຮືອງ ໜ້າອອນຊອນ ຂອງແຄວັນເອຊິກາ

[໗໖໐-໗໖໑] ຍ້ອນບຸນນັ້ນຂ້ານ້ອຍຈຶ່ງມີຜິວພັນງາມແນວນີ້ ຯລຯ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທິດແນວນີ້
(ເທບທິດາອົງທີ ໔ )

[໗໖໔-໗໖໔] ເທບທິດາ ຍ້ອນບຸນອັນໃດທ່ານຈຶ່ງມີຜິວພັນງາມຍິ່ງ ຯລຯ
ແລະມີຣັດສະໝີສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

[໗໖໕] ເທບທິດານັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ
ຈຶ່ງຕອບບັນຫາຜົນກຳໄປຕາມທີ່ພຣະເຖຣະຖາມວ່າ

[໗໖໖] ຊາດກ່ອນ ຂ້ານ້ອຍໄດ້ຖວາຍດອກບົວຂຽວກຳມືໜຶ່ງ
ແດ່ພິກຂຸຜູ້ກຳລັງທ່ຽວບິນທະບາດຢູ່ໃນປັນນະກະຕະນະຄອນເຊິ່ງຕັ້ງຢູ່ເທິງເນີນ

ເປັນເມືອງທີ່ຮຸ່ງເຮືອງ ໜ້າອອນຊອນ ຂອງແຄວ້ນເອຊີກາ

[໑໗-໑໙] ຍ້ອນບຸນນັ້ນຂ້ານ້ອຍຈຶ່ງມີຜິວພັນງາມແນວນີ້ ຯລຯ
ແລະມີຣັດສະໝີສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

(ເທບທິດາອົງທີ ๓)

[໒໐-໑໑] ເທບທິດາ ທ່ານມີຜິວພັນງາມຍິ່ງ ຯລຯ
ແລະມີຣັດສະໝີສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

[໑໒] ເທບທິດານັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ
ຈຶ່ງຕອບບັນຫາຂອງຕົນກຳໄປຕາມທີ່ພຣະເຖຣະຖາມວ່າ

[໑๓] ຊາດກ່ອນຂ້ານ້ອຍໄດ້ຖວາຍດອກບົວຫຼວງເຊິ່ງມີຮາກຂາວ ກີບຊຽວ
ເກີດໃນສະນ້ຳກຳມືໜຶ່ງ
ແດ່ພິກຂຸຜູ້ກຳລັງທ່ຽວບິນທະບາດຢູ່ໃນປັນນະກະຕະນະຄອນ
ເຊິ່ງຕັ້ງຢູ່ເທິງເນີນ ເປັນເມືອງທີ່ຮຸ່ງເຮືອງ ໜ້າອອນຊອນ ຂອງແຄວ້ນເອຊີກາ

[໑໔-໑໕] ຍ້ອນບຸນນັ້ນຂ້ານ້ອຍຈຶ່ງມີຜິວພັນງາມແນວນີ້ ຯລຯ
ແລະມີຣັດສະໝີສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

(ເທບທິດາອົງທີ ໔)

[໑໒-໑໗] ເທບທິດາ ທ່ານມີຜິວພັນງາມຍິ່ງ ຯລຯ
ແລະມີຣັດສະໝີສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

[໑໙] ເທບທິດານັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ
ຈຶ່ງຕອບບັນຫາຕົນກຳໄປຕາມທີ່ພຣະເຖຣະຖາມວ່າ

[໑໗໐] ຊາດກ່ອນຂ້ານ້ອຍຊື່ວ່າສຸມະນາ ໄດ້ຖວາຍດອກມະລິຈູມ ມີສີຄ້າຍງາຊ້າງ
ແດ່ພິກຂຸຜູ້ກຳລັງທ່ຽວບິນທະບາດຢູ່ໃນປັນນະກະຕະນະຄອນເຊິ່ງຕັ້ງຢູ່ເທິງເນີນ
ເປັນເມືອງທີ່ຮຸ່ງເຮືອງ ໜ້າອອນຊອນ ຂອງແຄວ້ນເອຊີກາ

[໑໗໑-໑໗໔] ຍ້ອນບຸນນັ້ນ ຂ້ານ້ອຍຈຶ່ງມີຜິວພັນງາມແນວນີ້ ຯລຯ
ແລະມີຣັດສະໝີສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

**ຈະຕຸຣິດຖີວິມານທີ ໑ ຈົບ**

# ໗. ອຳພະວິມານ

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ຍິງຜູ້ຖວາຍວັດສວນໝາກມ່ວງ

(ພຣະມະຫາໂມກຄັນລານະເຖຣະຖາມເທບທິດາອົງໜຶ່ງວ່າ)

[໗໘໓] ສວນໝາກມ່ວງທິບຂອງທ່ານ ໜ້າອອນຊອນໃນສວນນີ້ມີຜາສາດກວ້າງໃຫຍ່
ກຶກກ້ອງໄປດ້ວຍສຽງດົນຕີຕ່າງ ໆ ເຫຼົ່າເທບອັບປະສອນກໍສົ່ງສຽງເຈື້ອຍແຈ້ວ

[໗໘໔] ຜາສາດຂອງທ່ານນີ້ມີປະທີບຄຳດວງໃຫຍ່ສະຫວ່າງສະໄຫວຢູ່ປະຈຳ
ຫ້ອມລ້ອມໂດຍຮອບດ້ວຍຕົ້ນໝາກມ່ວງທີ່ມີໝາກເປັນຜ້າ

[໗໘໕-໗໘໖] ຍ້ອນບຸນອັນໃດທ່ານຈຶ່ງມີຜິວພັນງາມແນວນີ້ ຯລຯ
ແລະມີຣັດສະໝີສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

[໗໘໗] ເທບທິດານັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ
ຈຶ່ງຕອບບັນຫາຜົນກຳໄປຕາມທີ່ພຣະເຖຣະຖາມວ່າ

[໗໘໘] ຊາດກ່ອນຂ້ານ້ອຍເກີດເປັນມະນຸດຢູ່ໃນໝູ່ມະນຸດໃນມະນຸດສາໂລກ
ຂ້ານ້ອຍໄດ້ສ້າງວິຫານຫ້ອມລ້ອມດ້ວຍຕົ້ນໝາກມ່ວງຖວາຍສົງ

[໗໘໙] ເມື່ອໃຫ້ສ້າງວິຫານສຳເລັດຮຽບຮ້ອຍແລ້ວ ຈະທຳການສະຫຼອງ
ຈຶ່ງໃຊ້ຜ້າປະດັບຕົ້ນໝາກມ່ວງທັງຫຼາຍແລ້ວ ແຕ່ງໃຫ້ເປັນໜ່ວຍໝາກມ່ວງ

[໗໙໐] ຂ້ານ້ອຍເຫຼື້ອມໃສເຍືອງໄຟໄວ້ທີ່ຕົ້ນໝາກມ່ວງເຫຼົ່ານັ້ນ
ນິມົນໝູ່ສາວົກຂອງພຣະຜູ້ມີພຣະພາກເຈົ້າເຊິ່ງເປັນໝູ່ທີ່ສູງສຸດໃຫ້ສັນແລ້ວ
ໄດ້ມອບຖວາຍວິຫານນັ້ນແດ່ສົງດ້ວຍມືທັງສອງຂອງຕົນ

[໗໙໑] ຍ້ອນບຸນນັ້ນຂ້ານ້ອຍຈຶ່ງມີສວນໝາກມ່ວງທີ່ໜ້າອອນຊອນ
ໃນສວນນີ້ມີຜາສາດກວ້າງໃຫຍ່
ກຶກກ້ອງໄປດ້ວຍສຽງດົນຕີຕ່າງ ໆ ເຫຼົ່າເທບອັບປະສອນກໍສົ່ງສຽງເຈື້ອຍແຈ້ວ

[໗໙໒] ຜາສາດຂອງຂ້ານ້ອຍນີ້ມີປະທີບຄຳດວງໃຫຍ່ສະຫວ່າງສະໄຫວຢູ່ປະຈຳ
ຫ້ອມລ້ອມໂດຍຮອບດ້ວຍຕົ້ນໝາກມ່ວງທີ່ມີໝາກເປັນຜ້າ

[໗໙໓-໗໙໔] ຍ້ອນບຸນນັ້ນເຮົາຈຶ່ງມີຜິວພັນງາມແນວນີ້ ຯລຯ

ແລະມີຣັດສະໝີສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

**ອຳພະວິມານທີ ໗ ຈົບ**

# ໘. ປີຕະວິມານ

## ວ່າດ້ວຍວິມານສີເຫຼືອງທີ່ເກີດຂຶ້ນແກ່ຍິງຜູ້ຖວາຍດອກບວບຂົມ

(ທ້າວສັກກະເທວະຣາດຕັດຖາມເທບທິດາອົງໜຶ່ງວ່າ)

[໖໘໕] ເທບທິດາ ຜູ້ມີຜ້ານຸ່ງຫົ່ມແລະທຸງລ້ວນແຕ່ສີເຫຼືອງ
ປະດັບປະດາດ້ວຍເຄື່ອງປະດັບສີເຫຼືອງ
ມີກາຍລູບທາດ້ວຍຈັນເຫຼືອງ ທັດຊົງດອກບົວເຫຼືອງ

[໖໘໖] ມີຜາສາດສີເຫຼືອງ ມີບ່ອນນອນບ່ອນນັ່ງສີເຫຼືອງ ມີພາຊະນະສີເຫຼືອງ
ມີສັດສີເຫຼືອງ ມີລົດສີເຫຼືອງ ມີມ້າສີເຫຼືອງ ມີພັດສີເຫຼືອງ

[໖໘໗] ເທບທິດາຜູ້ຈະເລີນ ຊາດກ່ອນ ທ່ານໄດ້ເຮັດກຳອັນໃດໄວ້ໃນມະນຸດສາໂລກ
ທ່ານຈົ່ງຕອບຕາມທີ່ເຮົາຖາມເທີ້ນວ່າ ນີ້ເປັນຜົນຂອງກຳອັນໃດນໍ

(ເທບທິດານັ້ນທູນຕອບວ່າ)

[໖໘໘] ພຣະອົງຜູ້ຈະເລີນ ຂ້ານ້ອຍໄດ້ນ້ອມນຳດອກບວບຂົມຈຳນວນ ໔ ດອກ
ເຊິ່ງມີຣົດຂົມ ບໍ່ມີໃຜປາຖະໜາ ໄປບູຊາພຣະສະຖູບ

[໖໘໙] ຂ້ານ້ອຍມີຈິດເຫຼື້ອມໃສມຸ້ງເຖິງພຣະບໍຣົມສາຣີຣິກະທາດຂອງພຣະສາດສະດາ
ມີໃຈຈົດຈໍ່ພຣະບໍຣົມສາຣີຣິກະທາດຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ
ບໍ່ທັນພິຈາລະນາເບິ່ງທາງທີ່ງົວແມ່ນັ້ນມາ

[໗໐໐] ທັນໃດນັ້ນ ງົວແມ່ໄດ້ຂວິດຂ້ານ້ອຍ
ທີ່ຍັງບໍ່ທັນໄປເຖິງພຣະສະຖູບສົມຄວາມຕັ້ງໃຈ
ຖ້າຂ້ານ້ອຍເພິ່ງສັ່ງສົມບຸນນັ້ນໄວ້ໄດ້ຍິ່ງຂຶ້ນ
ທິບພະຍະສົມບັດກໍຈະເພີ່ງມີຍິ່ງກວ່ານີ້ແນ່

[໗໐໑] ຂ້າແດ່ທ້າວມະຄະວານເທບກຸນຊະຣະ ຈອມເທບ ຍ້ອນກຸສົນກຳນັ້ນ
ຂ້ານ້ອຍຈຶ່ງລະກາຍມະນຸດມາຢູ່ຮ່ວມກັບພຣະອົງ

[๗๐๔] ທ້າວມະຄະວານເທບກຸນຊອນ ຈອມເທບຊັ້ນຕາວະຕຶງສາ
ຊົງສະດັບເນື້ອຄວາມນີ້ແລ້ວ ເມື່ອຈະໃຫ້ເທວະດາຊັ້ນຕາວະຕຶງສາເຫຼື້ອມໃສ
ຈຶ່ງໄດ້ຕັດກັບມາຕະລີເທບສາຣະຖີວ່າ

[๗๐๑] ມາຕະລີ ທ່ານຈົ່ງເບິ່ງຜົນກຳອັນວິຈິດໜ້າອັດສະຈັນນີ້
ຂອງຄວນເຮັດບຸນທີ່ເທບທິດານີ້ເຮັດແລ້ວເຖິງຈະໜ້ອຍ ຜົນບຸນກັບມີຫຼາຍ

[๗๐๔] ເມື່ອມີຈິດເຫຼື້ອມໃສພຣະຕະຖາຄົດສຳມາສຳພຸດທະເຈົ້າ
ພຣະປັດເຈກພຸດທະເຈົ້າ ຫຼືສາວົກຂອງພຣະສຳມາສຳພຸດທະເຈົ້າແລ້ວ
ທັກຂິນາບໍ່ຊື່ວ່າມີຜົນໜ້ອຍແຕ່ຢ່າງໃດ

[๗๐๕] ມາເທີ້ນ ມາຕະລີ ແມ່ນຊາວເຮົາທັງຫຼາຍກໍຄວນຟ້າວເລັ່ງບູຊາ
ພຣະບໍຣົມສາຣີຣິກະທາດຂອງພຣະຕະຖາຄົດເຈົ້າໃຫ້ຍິ່ງ ໆ ຂຶ້ນໄປ
ຍ້ອນການສັ່ງສົມບຸນນຳຄວາມສຸກມາໃຫ້

[๗๐๖] ເມື່ອພຣະຕະຖາຄົດເຈົ້າຍັງຊົງພະຊົນຢູ່ກໍຕາມ
ສະເດັດປະຣິນິບພານແລ້ວກໍຕາມ
ເມື່ອຈິດສະໝ່ຳສະເໝີ ຜົນກໍຍ່ອມມີສະໝ່ຳສະເໝີ
ຍ້ອນເຫດທີ່ຕັ້ງຈິດໄວ້ຖືກຕ້ອງ ສັດທັງຫຼາຍຍ່ອມໄປສຸກຄະຕິ

[๗๐๗] ພຣະຕະຖາຄົດທັງຫຼາຍຊົງອຸບັດມາເພື່ອປະໂຫຍດແກ່ຊົນທັງຫຼາຍນໍ
ທາຍົກທາຍິກາທັງຫຼາຍຖວາຍສັກກາຣະບູຊາແລ້ວໄດ້ໄປສະຫວັນ

**ປີຕະວິມານທີ ๗ ຈົບ**

# ໑໐. ອຸດສຸວິມານ

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ຍິງຜູ້ຖວາຍທ່ອນອ້ອຍ

(ພຣະມະຫາໂມກຄັນລານະເຖຣະຖາມເທບທິດາອົງໜຶ່ງວ່າ)

[๗๐๙] ທ່ານມີສີຣິ ມີຣັດສະໝີກາຍ ມີບໍລິວານຍົດແລະມີອຳນາດ
ເປ່ງຣັດສະໝີສ່ອງທົ່ວແຜ່ນດິນພ້ອມທັງເທວະໂລກໃຫ້ສະຫວ່າງສະໄຫວ
ຮຸ່ງເຮືອງດັ່ງພຣະຈັນແລະພຣະອາທິດ ແລະດັ່ງທ້າວມະຫາພົມ
ເປ່ງຣັດສະໝີງາມລ້ຳກວ່າຫວຍເທບຊາວໄຕຣທິດ ພ້ອມທັງພຣະອິນ

[໗໐໗] ອາດຕະມາຂໍຖາມທ່ານ ເທບທິດາຜູ້ເລີໂສມ ປະດັບມາໄລດອກບົວ
ມີມາໄລແກ້ວປະດັບເຊີດ ມີຜິວພັນພຸດຜ່ອງດັ່ງຄໍາ
ປະດັບປະດາອາພອນທີ່ສວຍງາມ ຊຶ່ງເຄື່ອງປະດັບຊັ້ນເລີດ
ທ່ານເປັນໃຜມາໄຫວ້ອາດຕະມາ

[໗໑໐] ຊາດກ່ອນທ່ານເກີດເປັນມະນຸດ ໄດ້ເຮັດກໍາອັນໃດມາກ່ອນ
ໄດ້ສັ່ງສົມທານໄວ້ດີ ຫຼືວ່າຮັກສາສີນໄວ້ດີ
ເກີດໃນສະຫວັນ ມີບໍລິວານຍົດ ຍ້ອນກໍາອັນໃດ
ເທບທິດາ ອາດຕະມາຖາມແລ້ວ ຂໍທ່ານຈົ່ງບອກເທີ້ນວ່າ
ນີ້ເປັນຜົນຂອງກໍາອັນໃດນໍ

(ເທບທິດານັ້ນຕອບວ່າ)

[໗໑໑] ພຣະຜູ້ເປັນເຈົ້າຜູ້ຈະເລີນ ເມື່ອບໍ່ດົນມານີ້ ພຣະເຖຣະອົງໜຶ່ງ
ເຂົ້າມາບິນທະບາດຍັງເຮືອນຂອງຂ້ານ້ອຍໃນໝູ່ບ້ານນີ້ແລ
ຈາກນັ້ນຂ້ານ້ອຍມີຈິດເຫຼື້ອມໃສ ເກີດປີຕິສຸດປະມານ
ຈຶ່ງໄດ້ຖວາຍທ່ອນອ້ອຍແດ່ທ່ານ

[໗໑໒] ແຕ່ຕໍ່ມາພາຍຫຼັງ ແມ່ຍ່າໄຕ່ຖາມຂ້ານ້ອຍວ່າ
ແມ່ໂຕດີ ເຈົ້າເອົາອ້ອຍໄປຖິ້ມໄວ້ໄສ
ຂ້ານ້ອຍຈຶ່ງຕອບວ່າ ບໍ່ໄດ້ຖິ້ມແລະກໍບໍ່ໄດ້ກິນ
ແຕ່ຂ້ານ້ອຍໄດ້ຖວາຍແດ່ພິກຂຸຜູ້ສະງົບລະງັບໄປແລ້ວ

[໗໑໓] ທັນໃດນັ້ນ ແມ່ຍ່ານັ້ນໄດ້ດ່າຂ້ານ້ອຍວ່າ
ນີ່ເຈົ້າຫຼືຂ້ອຍເປັນໃຫຍ່ກັນແນ່
ວ່າແລ້ວກໍຄວ້າກ້ອນດິນດຶກໃສ່ຂ້ານ້ອຍ
ຂ້ານ້ອຍຕາຍຈາກມະນຸດສາໂລກນັ້ນແລ້ວກໍມາເກີດເປັນເທບທິດາ

[໗໑໔] ຂ້ານ້ອຍເຮັດກຸສົນກໍານັ້ນໄວ້ທີ່ນີ້
ຕົນເອງຈຶ່ງໄດ້ມາສະເຫວີຍຜົນກໍາທີ່ນໍາຄວາມສຸກມາໃຫ້
ໄດ້ຮັບການບົນເບີບັນເທີງໃຈຢູ່
ດ້ວຍກາມມະຄຸນ ໕ ຮ່ວມກັບໝູ່ເທບ

[໗໑໕] ຂ້ານ້ອຍເຮັດກຸສົນກໍານັ້ນໄວ້ທີ່ນີ້

ຕົນເອງຈຶ່ງໄດ້ມາສະເຫວີຍຜົນກຳທີ່ນຳຄວາມສຸກມາໃຫ້
ມີທ້າວສັກກະຈອມເທບຄຸ້ມຄອງ ມີຫວຍເທບຊັ້ນໄຕຣທິດຮັກສາ
ພຽບພ້ອມຢູ່ດ້ວຍກາມມະຄຸນ ໕

[໗໑໖] ຜົນບຸນດັ່ງກ່າວມານີ້ບໍ່ແມ່ນເລັກໜ້ອຍ
ບຸນທີ່ຂ້ານ້ອຍໄດ້ຖວາຍອ້ອຍໃຫ້ຜົນຫຼາຍ
ຂ້ານ້ອຍຈຶ່ງໄດ້ຮັບການປິ່ນເປີບັນເທີງໃຈຢູ່
ດ້ວຍກາມມະຄຸນ ໕ ຮ່ວມກັບໝູ່ເທບ

[໗໑໗] ຜົນບຸນດັ່ງກ່າວມານີ້ບໍ່ແມ່ນເລັກໜ້ອຍ
ບຸນທີ່ຂ້ານ້ອຍໄດ້ຖວາຍອ້ອຍມີອານຸພາບຫຼາຍ
ຂ້ານ້ອຍຈຶ່ງມີທ້າວສັກກະຈອມເທບຄຸ້ມຄອງ
ມີຫວຍເທບຊັ້ນໄຕຣທິດຮັກສາ
ດັ່ງທ້າວສະຫັດສະໄນ ໃນນັນທະວັນ

[໗໑໘] ພຣະຜູ້ເປັນເຈົ້າຜູ້ຈະເລີນ ຂ້ານ້ອຍເຂົ້າໄປຫາພຣະຜູ້ເປັນເຈົ້າ
ຜູ້ອະນຸເຄາະເຊິ່ງມີປັນຍາແລ້ວ
ຂາບໄຫວ້ແລະຖາມເຖິງຄວາມບໍ່ມີພະຍາດ ຈາກນັ້ນກໍມີຈິດເຫຼື້ອມໃສ
ເກີດປີຕິສຸດປະມານ ໄດ້ຖວາຍທ່ອນອ້ອຍແດ່ພຣະຜູ້ເປັນເຈົ້າ

**ອຸດສຸວິມານທີ ໑໐ ຈົບ**

## ໑໑. ວັນທະນະວິມານ

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ຍິງຜູ້ຂາບໄຫວ້ສະມະນະ

(ພຣະມະຫາໂມກຄັນລານະເຖຣະຖາມເທບທິດາອົງໜຶ່ງວ່າ)

[໗໑໙] ເທບທິດາ ທ່ານມີຜິວພັນງາມຍິ່ງ
ເປັ່ງຣັດສະໝີສະຫວ່າງສະໄຫວໄປທົ່ວທຸກທິດຢູ່ ຄືດາວປະກາຍພຶກ

[໗໒໐-໗໒໑] ຍ້ອນບຸນອັນໃດທ່ານຈຶ່ງມີຜິວພັນງາມແນວນີ້ ຯລຯ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

[໗໒໒] ເທບທິດານັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ

ຈຶ່ງຕອບບັນຫາຜົນກຳໄປຕາມທີ່ພຣະເຖຣະຖາມວ່າ

[໗໘໖] ເມື່ອຂ້ານ້ອຍເກີດເປັນມະນຸດຢູ່ໃນໝູ່ມະນຸດ
ພົບສະມະນະທັງຫຼາຍຜູ້ມີສີນຈຶ່ງໄຫວ້ຕີນ
ເຮັດໃຈໃຫ້ເຫຼື້ອມໃສ
ອັນໜຶ່ງ ຂ້ານ້ອຍພໍໃຈ ໄດ້ປະຄອງອັນຊະລີ

[໗໘໘-໗໘໙] ຍ້ອນບຸນນັ້ນຂ້ານ້ອຍຈຶ່ງມີຜິວພັນງາມແນວນີ້ ໆລໆ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

**ວັນທະນະວິມານທີ ໑໑ ຈົບ**

## ໑໘. ຣັດຊຸມາລາວິມານ

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ຍິງຜູ້ສັກກາຣະເຄົາລົບພຣະພຸດທະເຈົ້າ

(ພຣະມະຫາໂມກຄັນລານະເຖຣະຖາມເທບທິດາອົງໜຶ່ງວ່າ)

[໗໘໖] ເທບທິດາ ທ່ານມີຜິວພັນງົດງາມຫຼາຍ
ຂະນະທີ່ດົນຕີບັນເລງຢູ່ຢ່າງມ່ວນ
ທ່ານຍັບຍ້າຍກາຍມືແລະຕີນຟ້ອນລຳໄດ້ຢ່າງກົມກືນ

[໗໘໗] ເມື່ອທ່ານນັ້ນກຳລັງຟ້ອນລຳຢູ່ ສຽງທິບໜ້າຟັງ ໜ້າອອນຊອນໃຈ
ຍ່ອມເປ່ງອອກຈາກອະໄວຍະວະນ້ອຍໃຫຍ່ທຸກສ່ວນສັດຂອງທ່ານ

[໗໘໗] ທັງກິ່ນທິບ ຫອມຫວນຊື່ນໃຈ
ກໍຟຸ້ງອອກຈາກອະໄວຍະວະນ້ອຍໃຫຍ່ທຸກສ່ວນສັດຂອງທ່ານ

[໗໘໙] ເມື່ອທ່ານຍັບໄຫວກາຍໄປມາ ສຽງເຄື່ອງປະດັບທີ່ຊ້ອງຜົມ
ກໍອອກສຽງດັງມ່ວນ ໜ້າຟັງ ດັ່ງສຽງດົນຕີເຄື່ອງຫ້າ

[໗໙໐] ອັນໜຶ່ງ ຕຸ້ມຫູເພັດຕ້ອງລົມສັ່ນໄຫວ ກໍສົ່ງສຽງດັງມ່ວນ
ໜ້າຟັງ ດັ່ງສຽງດົນຕີເຄື່ອງຫ້າ

[໗໙໑] ແມ່ນມາໄລເທິງຫົວຂອງທ່ານມີກິ່ນຫອມຫວນຊື່ນໃຈ
ກໍສົ່ງກິ່ນຫອມຟຸ້ງໄປທົ່ວທຸກທິດ ຄືຕົ້ນຂຸໂລກ

[໗໖໔] ທ່ານສູດດົມກິ່ນຫອມຫວນນັ້ນ ທັງໄດ້ເຫັນຮູບທີ່ບໍ່ແມ່ນຂອງມະນຸດ
ເທບທິດາ ອາດຕະມາຖາມແລ້ວ ຂໍທ່ານຈົ່ງບອກເທີ້ນວ່າ
ນີ້ເປັນຜົນຂອງກໍາອັນໃດນໍ

(ເທບທິດານັ້ນຕອບວ່າ)

[໗໖໓] ຊາດກ່ອນ ຂ້ານ້ອຍເກີດເປັນທາສີຂອງພາມໃນໝູ່ບ້ານຄະຍາ
ມີບຸນໜ້ອຍ ດ້ອຍວາດສະໜາ ຄົນທັງຫຼາຍຮູ້ຈັກຂ້ານ້ອຍໃນນາມວ່າ ຣັດຊຸມາລາ

[໗໖໔] ຂ້ານ້ອຍເສຍໃຈຫຼາຍ ຍ້ອນຖືກດ່າວ່າ ຖືກຄຸ້ງນຕີຕ່າງ ໆ
ແລະຖືກຄຸກຄາມຈິ່ງຖືໝໍ້ນໍ້າອອກໄປ ເຮັດເປັນຄືກັບວ່າຈະໄປຕັກນໍ້າ

[໗໖໕] ແລ້ວໄດ້ວາງໝໍ້ນໍ້າໄວ້ຂ້າງທາງ ເຂົ້າໄປສູ່ປ່າຮົກໂດຍຕັດສິນໃຈວ່າ
ຈັກຕາຍໃນປ່ານີ້ແລ ເຮົາຢູ່ໄປຈະມີປະໂຫຍດອັນໃດນໍ

[໗໖໖] ຈຶ່ງເຮັດບ້ວງໃຫ້ແໜ້ນ ແຂວນເຂົ້າກັບຕົ້ນໄມ້
ບັດນັ້ນກໍຫຼຽວເບິ່ງໄປຮອບທິດດ້ວຍຄິດຢ້ານວ່າ ມີໃຜຢູ່ໃນປ່າບໍ່ນໍ

[໗໖໗] ຢູ່ບ່ອນນັ້ນ ຂ້ານ້ອຍໄດ້ຫຼຽວໄປເຫັນພຣະສໍາມາສໍາພຸດທະເຈົ້າ
ຜູ້ເປັນຈອມປາດ
ຊົງເກື້ອກູນສັດໂລກທັງມວນ ຜູ້ບໍ່ມີໂລກໄພ
ປະທັບນັ່ງເຂົ້າຊານຢູ່ທີ່ເຫງົ້າຕົ້ນໄມ້

[໗໖໘] ຂ້ານ້ອຍນັ້ນເກີດຄວາມສັງເວດ ຂົນລຸກຊູຊັນຢ່າງບໍ່ເຄີຍເປັນມາກ່ອນ ຄິດວ່າ
ໃຜນໍມາອາໄສຢູ່ໃນປ່ານີ້ ເປັນມະນຸດຫຼືເທວະດາກັນແທ້

[໗໖໙] ຍ້ອນໄດ້ເຫັນພຣະພຸດທະອົງຜູ້ໜ້າເຫຼື້ອມໃສ ຄວນແກ່ການຍິນດີ
ສະເດັດອອກຈາກປ່າ ແລ້ວມາສູ່ຄວາມບໍ່ມີປ່າ(ຄືກິເລດ)
ໃຈຂອງຂ້ານ້ອຍກໍເຫຼື້ອມໃສດ້ວຍຄິດເຫັນວ່າ
ທ່ານຜູ້ນີ້ຄົງຈະບໍ່ແມ່ນຄົນທໍາມະດາສາມັນເປັນແທ້

[໗໘໐] ທ່ານຜູ້ນີ້ຄຸ້ມຄອງອິນຊີໄດ້ແລ້ວ ຍິນດີໃນຊານ ມີໃຈບໍ່ອອກແວກ
ຈະຕ້ອງເປັນພຣະພຸດທະເຈົ້າຜູ້ຊົງເກື້ອກູນສັດໂລກທັງມວນເປັນແທ້

[໗໘໑] ທ່ານຜູ້ນີ້ເປັນທີ່ໜ້າຢ້ານກົວ
ຜູ້ເຊິ່ງບຸກຄົນທີ່ປາສະຈາກຄວາມພຽນແລະຄວາມມາດໝາຍ

ເຮັດໃຫ້ຊົງຊົມຊື່ນໄດ້ຍາກ ດັ່ງຣາດຊະສີເຊິ່ງເປັນສັດຢູ່ຖ້ຳ ໜ້າຢ້ານກົວ
ຍາກທີ່ໃຜຈະເຮັດໃຫ້ຊົມຊື່ນແລະຍາກທີ່ຈະໄດ້ພົບເຫັນ ຄືດອກໝາກເດື່ອ

[໙໔໘] ພຣະຕະຖາຄົດເຈົ້າພຣະອົງນັ້ນ
ໄດ້ຕັດຮຽກຂ້ານ້ອຍດ້ວຍພຣະວາຈາທີ່ນຸ້ມນວນວ່າ
ຣັດຊຸມາລາແລະຮັບສັ່ງກັບຂ້ານ້ອຍວ່າ ທ່ານຈົ່ງເຖິງຕະຖາຄົດເປັນບ່ອນເພິ່ງເທີ້ນ

[໙໔໙] ຂ້ານ້ອຍຟັງພຣະດຳຣັດອັນປາສະຈາກໂທດ ປະກອບດ້ວຍປະໂຫຍດ
ມົດຈິດ ລະອຽດອ່ອນ ນຸ້ມນວນມ່ວນ
ເປັນເຄື່ອງບັນເທົາຄວາມໂສກເສົ້າທັງປວງໄດ້ນັ້ນ ຈຶ່ງເກີດຈິດເຫຼື້ອມໃສ

[໙໔໔] ພຣະຕະຖາຄົດຜູ້ຊົງເກື້ອກູນສັດໂລກທຸກໝູ່ເຫຼົ່າ ຊົງຮູ້ວ່າ
ຂ້ານ້ອຍມີຈິດເຫຼື້ອມໃສ ມີໃຈບໍລິສຸດ ຄວນແກ່ການຮັບຟັງ
ແລ້ວຈຶ່ງໄດ້ຊົງພ່ຳສອນ

[໙໔໕] ພຣະອົງໄດ້ຕັດສອນຂ້ານ້ອຍວ່າ ນີ້ຄືທຸກ ນີ້ຄືເຫດເກີດທຸກ
ນີ້ຄືຄວາມດັບທຸກ ແລະນີ້ຄືທາງສາຍກົງໃຫ້ບັນລຸອະມະຕະທຳ[໑]

[໙໔໖] ຂ້ານ້ອຍດຳລົງຢູ່ໃນພຣະໂອວາດຂອງພຣະຕະຖາຄົດ
ຜູ້ຊົງອະນຸເຄາະເກື້ອກູນ ຊົງສະຫຼາດວ່າ
ບຸກຄົນໄດ້ບັນລຸທາງຄືນິບພານເຊິ່ງເປັນທຳອັນບໍ່ຕາຍ
ສະງົບລະງັບ ບໍ່ມີການຈຸຕິ

[໙໔໗] ຂ້ານ້ອຍນັ້ນມີຄວາມພັກດີໝັ້ນ ບໍ່ຫວັ່ນໄຫວ
ຍ້ອນມີຄວາມເຫັນຖືກເປັນປົກກະຕິ
ດ້ວຍສັດທາທີ່ຢັ່ງຮາກລົງແລ້ວ ຈຶ່ງໄດ້ເປັນທິດາແທ້ທີ່ຈິງຂອງພຣະພຸດທະອົງ

[໙໔໙] ຂ້ານ້ອຍນັ້ນບໍ່ມີໄພ ຈຶ່ງທ່ຽວມ່ວນຊື່ນບັນເທີງໃຈຢູ່
ທັດຊົງມາໄລທິບ ດື່ມນ້ຳຫວານທີ່ເຮັດໃຫ້ສົດຊື່ນ

[໙໔໐] ເຫຼົ່າດຸຣິຍະເທບ ໖໐,໐໐໐ ອົງ
ຊ່ວຍກັນປຸກເຮົ້າຂ້ານ້ອຍໃຫ້ເກີດປີຕິໂສມະນັດ
ໄດ້ແກ່ ເທບພະບຸດມີນາມວ່າ ອາລຳພະ ຄັກຄະຣະ
ພີມະ ສາທຸວາທີ ປະສັງສະຍະ

[໗໕໐]　ໂປກະຂະຣະແລະສຸຜັດສະ ເຫຼົ່າເທບທິດານ້ອຍ ໆ ມີນາມວ່າ
ວີນາ ໂມກຂາ ນັນທາ ສຸນັນທາ ໂສນທິນນາ ສຸຈິມະທິຕາ

[໗໕໑]　ອະລຳພຸສາ ມິດສະເກສີແລະບຸນທະຣິກາ ອັນໜຶ່ງ ເທບກັນຍາອີກພວກໜຶ່ງ
ຄືເອນີປັດສາ ສຸຜັດສາ ສຸພັດທາແລະມຸທຸວາທີນີ

[໗໕໒]　ຜູ້ປະເສີດກວ່ານາງອັບປະສອນທັງຫຼາຍ
ຜູ້ມີໜ້າທີ່ສຸກຍູ້ ໃຫ້ເກີດປີຕິໂສມະນັດ
ເທວະດາເຫຼົ່ານັ້ນ ພໍໄດ້ເວລາກໍເຂົ້າມາຂ້ານ້ອຍ ສະເໜີດ້ວຍອາຈາໜ້າຍິນດີວ່າ

[໗໕໓]　ຖ້າຈັ່ງຊັ້ນແລ້ວ ພວກເຮົາຈັກຟ້ອນລຳ ຂັບຮ້ອງ ຢັ້ນເປີທ່ານໃຫ້ອອນຊອນ
ສະຖານທີ່ທີ່ຂ້ານ້ອຍໄດ້ຮັບໃນບັດນີ້ ບໍ່ແມ່ນສະຖານທີ່ສຳລັບຄົນທີ່ບໍ່ໄດ້ເຮັດບຸນໄວ້
ແຕ່ເປັນສະຖານທີ່ສຳລັບຄົນທີ່ໄດ້ເຮັດບຸນໄວ້ແລ້ວທໍ່ນັ້ນ

[໗໕໔]　ບໍ່ມີຄວາມໂສກ ໜ້າເພີດເພີນຈະເລີນໃຈ
ເປັນອຸທະຍານກວ້າງໃຫຍ່ຂອງເຫຼົ່າເທບຊັ້ນຕາວະຕຶງສາ
ສຳລັບຜູ້ທີ່ບໍ່ໄດ້ເຮັດບຸນໄວ້ຍ່ອມບໍ່ມີຄວາມສຸກທັງໂລກນີ້ແລະໂລກໜ້າ

[໗໕໕]　ສ່ວນຜູ້ທີ່ໄດ້ເຮັດບຸນໄວ້ແລ້ວຍ່ອມມີຄວາມສຸກທັງໂລກນີ້
ແລະໂລກໜ້າແນ່ນອນ
ຜູ້ປາຖະໜາຈະສະຖິດຢູ່ຮ່ວມກັບເທບຊັ້ນຕາວະຕຶງສາເຫຼົ່ານັ້ນ
ຄວນເຮັດກຸສົນໄວ້ໃຫ້ຫຼາຍ ຍ້ອນວ່າເຫຼົ່າຊົນຜູ້ທີ່ໄດ້ເຮັດບຸນໄວ້ແລ້ວ
ຍ່ອມພ້ອມພຽງດ້ວຍໂພຄະສົມບັດ ບັນເທີງຢູ່ໃນສະຫວັນ

[໗໕໖]　ພຣະຕະຖາຄົດທັງຫຼາຍ
ຊົງອຸບັດຂຶ້ນເພື່ອປະໂຫຍດແກ່ຊົນຫຼວງຫຼາຍນໍ
ຊົງເປັນພຣະທັກຂີໄນຍະບຸກຄົນ
ເປັນບໍ່ເກີດແຫ່ງເນື້ອນາບຸນຂອງມະນຸດທັງຫຼາຍ
ເປັນຜູ້ທີ່ທາຍົກທາຍິກາທັງຫຼາຍເຮັດສັກກາຣະບູຊາແລ້ວ
ຈຶ່ງບັນເທີງຢູ່ໃນສະຫວັນ

**ຣັດຊຸມາລາວິມານທີ ໑ ໘ ຈົບ**

## ລວມເລື້ອງວິມານທີ່ມີໃນວັກນີ້ ຄື



**ມັນຊິດຖະກະວັກທີ ໔ ຈົບ**

**ອິດຖິວິມານ ຈົບບໍລິບູນ**

# ໔. ປຸຣິສະວິມານ

## ໕. ມະຫາຣະຖະວັກ

## ໝວດວ່າດ້ວຍລົດໃຫຍ່

### ໑. ມັນທູກະເທວະປຸດຕະວິມານ

### ວ່າດ້ວຍວິມານທີ່ເກີດຂຶ້ນແກ່ມັນທູກະເທບພະບຸດ

(ພຣະຜູ້ມີພຣະພາກເຈົ້າຕັດຖາມມັນທູກະເທບພະບຸດວ່າ)

[໘໕໗] ໃຜກັນມີຜິວພັນງົດງາມຫຼາຍ ຮຸ່ງເຮືອງດ້ວຍລິດແລະບໍລິວານຍົດ
ເປ່ງຣັດສະໝີສະຫວ່າງສະໄຫວໄປທົ່ວທຸກທິດ ຂາບຕີນທັງສອງຂອງເຮົາຢູ່

(ມັນທູກະເທບພະບຸດຂາບທູນວ່າ)

[໘໕໘] ຊາດກ່ອນຂ້າພຣະອົງໄດ້ເກີດເປັນກົບທ່ຽວຫາກິນຢູ່ໃນນ້ຳ
ຂະນະທີ່ຂ້າພຣະອົງກຳລັງຟັງທຳຂອງພຣະອົງຢູ່
ຄົນລ້ຽງງົວໄດ້ຂ້າຂ້າພຣະອົງ

[໘໕໙] ຂໍພຣະອົງຊົງເລັງເຫັນຄວາມສຳເລັດແຫ່ງຈິດທີ່ເຫຼື້ອມໃສພຽງບຶດດຽວ
ແລະໂຜດທອດພຣະເນດບໍລິວານຍົດ ອານຸພາບ
ຜິວພັນແລະຄວາມຮຸ່ງເຮືອງຂອງຂ້າພຣະອົງເທີ້ນ

[໘໖໐] ຂ້າແດ່ພຣະໂຄດົມສຳມາສຳພຸດທະເຈົ້າ
ເຫຼົ່າຊົນຜູ້ໄດ້ຟັງທຳຂອງພຣະອົງຕະຫຼອດການຍາວນານ
ຍ່ອມບັນລຸຖານະທີ່ບໍ່ຫວັ່ນໄຫວ
ເຊິ່ງເປັນຖານະທີ່ເຫຼົ່າສັດໄປແລ້ວບໍ່ເສົ້າໂສກ

**ມັນທູກະເທວະປຸດຕະວິມານທີ ໑ ຈົບ**

### ໒. ເຣວະຕີວິມານ

### ວ່າດ້ວຍວິມານທີ່ເກີດຂຶ້ນແກ່ນັນທິຍະອຸປາສົກຜູ້ເປັນສາມີຂອງນາງເຣວະດີ

(ພຣະຜູ້ມີພຣະພາກເຈົ້າຕັດວ່າ)

[໗໖໑] ຍາດມິດແລະສະຫາຍຜູ້ມີໃຈດີ ຍ່ອມຍິນດີຕ້ອນຮັບ
ບຸກຄົນຜູ້ທ່າງຫາຍໄປດົນ
ແລ້ວກັບມາຈາກບ່ອນໄກໂດຍໂດຍປອດໄພວ່າ ມາແລ້ວ ສັນໃດ

[໗໖໘] ບຸນທັງຫຼາຍກໍເຊັ່ນດຽວກັນ ຍ່ອມຕ້ອນຮັບ
ສະເພາະບຸກຄົນຜູ້ເຮັດບຸນໄວ້ແລ້ວ
ເຊິ່ງຈາກໂລກນີ້ໄປສູ່ໂລກໜ້າ ຄືຍາດຕ້ອນຮັບຍາດທີ່ຮັກຜູ້ກັບມາ

(ຍັກບໍລິວານຂອງທ້າວເວດສະວັນປາຖະໜາຈະຈັບນາງເຣວະດີໂຍນລົງໄປໃນອຸດສະທະນະຣົກ
ຈຶ່ງກ່າວວ່າ)

[໗໖໓] ຈົ່ງລຸກຂຶ້ນ ນາງເຣວະດີຜູ້ແສນຈະຊົ່ວຊ້າ ມີປົກກະຕິບໍ່ໃຫ້ທານ
ປະຕູ(ນະຣົກ)ເປີດແລ້ວ ພວກເຮົາຈະນຳເຈົ້າໄປໂຍນລົງນະຣົກ
ອັນເປັນສະຖານທີ່ທອດຖອນໃຈຂອງເຫຼົ່າສັດນະຣົກ
ຜູ້ມີຄວາມທຸກທໍລະມານທົນທຸກຢູ່

(ພຣະທຳສັງຄີຕິກາຈານທັງຫຼາຍກ່າວວ່າ)

[໗໖໔] ຍັກໃຫຍ່ຕາແດງສອງຕົນດັ່ງທູດພະຍາຍົມນັ້ນ ເມື່ອກ່າວດັ່ງນີ້ແລ້ວ
ກໍຈັບແຂນນາງເຣວະດີຄົນລະຂ້າງ ພາໄປໃກ້ໝູ່ເທວະດາ

(ນາງເຣວະດີຖາມຍັກສອງຕົນວ່າ)

[໗໖໕] ນັ້ນວິມານຂອງໃຜ ມີຣັດສະໝີດັ່ງແສງອາທິດ ໜ້າພໍໃຈ
ເຮືອງຮອງ ງົດງາມ ໜ້າຢູ່ອາໄສ ປົກຄຸມດ້ວຍຕາໜ່າງຄຳ
ເນືອງແໜ້ນໄປດ້ວຍເທບພະບຸດແລະເທບທິດາ ຮຸ່ງເຮືອງດັ່ງແສງອາທິດ

[໗໖໖] ໝູ່ເທບນາຣີລູບທາກາຍດ້ວຍແກ່ນຈັນຫອມ
ຊ່ອຍເຮັດວິມານທັງພາຍໃນແລະພາຍນອກໃຫ້ງົດງາມ
ວິມານນັ້ນມີຣັດສະໝີຜາກົດສະເໝີດ້ວຍແສງອາທິດ
ຄົນທີ່ຂຶ້ນສະຫວັນບັນເທິງຢູ່ໃນວິມານເປັນໃຜກັນ

(ຍັກສອງຕົນຈຶ່ງບອກແກ່ນາງເຣວະດີວ່າ)

[໗໖໗] ທີ່ນະຄອນພາຣານະສີ ມີອຸປາສົກຊື່ນັນທິຍະ
ເປັນຄົນບໍ່ຂີ້ຖີ່ ເປັນທານະບໍດີ ຮູ້ຄວາມປະສົງຂອງຜູ້ຂໍ

ວິມານທີ່ເນືອງແໜ້ນໄປດ້ວຍເທບພະບຸດແລະເທບທິດາ
ຮຸ່ງເຮືອງດັ່ງແສງອາທິດ ນັ້ນເປັນຂອງນັນທິຍະອຸປາສິກາ

[໗໖໗] ໝູ່ເທບນາຣີລູບທາກາຍດ້ວຍແກ່ນຈັນຫອມ
ຊ່ອຍເຮັດວິມານທັງພາຍໃນແລະພາຍນອກໃຫ້ງົດງາມ
ວິມານນັ້ນມີຣັດສະໝີຜາກົດສະເໝີດ້ວຍແສງອາທິດ
ຄົນທີ່ຂຶ້ນສະຫວັນ ບັນເທີງຢູ່ໃນວິມານ ຄືນັນທິຍະອຸປາສິກາ

(ນາງເຣວະດີກ່າວວ່າ)

[໗໖໘] ເຮົາເປັນພັນລະຍາຂອງນັນທິຍະອຸປາສົກ
ເປັນໃຫຍ່ໃນເຮືອນ ເປັນໃຫຍ່ໃນຊັບສິນທັງໝົດຂອງສາມີ
ບັດນີ້ ເຮົາຈະອອນຊອນໃນວິມານຂອງສາມີ ບໍ່ປາຖະໜາຈະເຫັນນະຮົກ

(ຍັກສອງຕົນນັ້ນບໍ່ຍອມເຊື່ອຈຶ່ງພາໂຕນາງລົງໄປໃກ້ອຸດສະທະນະຮົກແລ້ວກ່າວວ່າ)

[໗໗໐] ນາງຜູ້ແສນຈະຊົ່ວຊ້າ ນີ້ແລ້ວນະຮົກສຳລັບເຈົ້າ
ບຸນເຈົ້າບໍ່ໄດ້ເຮັດໄວ້ໃນມະນຸດສາໂລກ
ຍ້ອນຄົນຂີ້ຖີ່ ມັກໂກດ ມີບາບທຳ
ຍ່ອມບໍ່ໄດ້ຢູ່ຮ່ວມກັບຜູ້ເກີດໃນສະຫວັນ

(ນາງເຣວະດີເຫັນນາຍນິຣະຍະບານສອງຕົນພາກັນມາດຶງລາກຕົນ ເພື່ອຈະໂຍນລົງໄປໃນຄູດນະຮົກ ຊື່ວ່າ ສັງສະວະກະ ຈຶ່ງຖາມເຖິງນະຮົກນັ້ນວ່າ)

[໗໗໑] ເປັນຫຍັງນໍ ຈຶ່ງຜາກົດແຕ່ອຸດຈາຣະ ປັດສາວະ ສິ່ງສົກກະປົກ
ເປັນຫຍັງ ອຸດຈາຣະນີ້ຈຶ່ງມີກິ່ນເໝັນຮ້າຍ ຄະຄຸ້ງໄປນໍ

(ນາຍນິຣະຍະບານຕອບວ່າ)

[໗໗໔] ນາງເຣວະດີ ນະຮົກທີ່ເຈົ້າຈະມົກໄໝ້ຢູ່ຫຼາຍພັນປີນີ້
ມີຊື່ວ່າ ສັງສະວະກະນະຮົກ ເລິກຮ້ອຍຊົ່ວຄົນ

(ນາງເຣວະດີຈຶ່ງຖາມວ່າ)

[໗໗໕] ເຮົາເຮັດກຳຊົ່ວທາງກາຍວາຈາໃຈອັນໃດນໍ
ຈຶ່ງຕົກສັງສະວະກະນະຮົກທີ່ເລິກຮ້ອຍຊົ່ວຄົນ

(ນາຍນິຣະຍະບານຕອບວ່າ)

[໗໗໔] ເຈົ້າລວງສະມະນະພາມແລະອະນິພົກພວກອື່ນ
ດ້ວຍການກ່າວຕົວະນັ້ນແລບາບທີ່ເຈົ້າເຮັດໄວ້

[໗໗໕] ຍ້ອນບາບນັ້ນເຈົ້າຈິ່ງຕົກສັງສະອະກະນະຣົກທີ່ເລີກ ໑໐໐ ຊົ່ວຄົນ
ນາງເຣວະດີ ເຈົ້າຈະຕ້ອງມົກໄໝ້ຢູ່ໃນນະຣົກນັ້ນຫຼາຍພັນປີ

[໗໗໖] ນາຍນິຣະຍະບານທັງຫຼາຍ ຈະຕັດມື ຕີນ ຫູ ແມ່ນກະທັ່ງດັງ
ອັນໜຶ່ງ ແມ່ນຝູງນົກກາກໍຈະພາກັນມາຫຸ້ມຈິກກິນເຈົ້າທີ່ດີ້ນທຸຣົນທຸຣາຍຢູ່

(ນາງເຣວະດີກ່າວວ່າ)

[໗໗໗] ໂຜດເທີ້ນທ່ານ ຂໍທ່ານທັງຫຼາຍຊ່ອຍນຳເຮົາກັບໄປເທີ້ນ
ເຮົາຈັກສ້າງກຸສົນກຳ ທີ່ຄົນເຮັດແລ້ວໄດ້ຮັບຄວາມສຸກ
ແລະບໍ່ເດືອດຮ້ອນໃນພາຍຫຼັງນັ້ນໃຫ້ຫຼາຍ
ດ້ວຍການໃຫ້ທານ ປະພຶດທຳສະໝ່ຳສະເໝີ
ການສັງລວມ ແລະການເຝິກອິນຊີ

(ນາຍນິຣະຍະບານກ່າວວ່າ)

[໗໗໘] ແຕ່ກ່ອນ ເຈົ້າຜະໝາດມົວເມົາ ບັດນີ້ຈະມາຮ້ອງໄຫ້ເຮັດຫຍັງນໍ
ເຈົ້າຈັກຕ້ອງສະເຫວີຍຜົນກຳທັງຫຼາຍທີ່ເຈົ້າເຮັດໄວ້ເອງ

(ນາງເຣວະດີກ່າວວ່າ)

[໗໗໙] ໃຜຈາກເທວະໂລກໄປສູ່ມະນຸດສາໂລກ ເມື່ອຖືກຖາມ
ເພິ່ງກ່າວຄຳເວົ້າຂອງເຮົາແນວນີ້ວ່າ
ຂໍທ່ານທັງຫຼາຍຈົ່ງຖວາຍທານ
ຄືຜ້ານຸ່ງ ຜ້າຫົ່ມ ບ່ອນນອນ ບ່ອນນັ່ງ ເຂົ້າແລະນ້ຳ
ໃນສະມະນະພາມທັງຫຼາຍຜູ້ປ່ອຍວາງອາດຍາ
ຍ້ອນວ່າຄົນຂີ້ຖີ່ ມັກໂກດ ມີບາບທຳ
ຍ່ອມບໍ່ໄດ້ເກີດຮ່ວມກັບຜູ້ໄປສະຫວັນ

[໗໘໐] ຖ້າເຮົານັ້ນຈາກບ່ອນນີ້ໄປ ໄດ້ເກີດເປັນມະນຸດແລ້ວ
ຈັກຮູ້ຄວາມປະສົງຂອງຜູ້ຂໍ ສົມບູນດ້ວຍສິນ

ຈັກສ້າງກຸສົນໃຫ້ຫຼາຍດ້ວຍການໃຫ້ທານ
ປະພຶດທຳສະໝ່ຳສະເໝີ ການສັງລວມ
ແລະການເຝິກອິນຊີ

[໗໗໑] ເຮົາຈັກປຸກສວນໄມ້ດອກ ຕົ້ນໄມ້ໃຫ້ຜົນ
ຈັກຕັດທາງເຂົ້າໄປໃນສະຖານທີ່ທີ່ຍ່າງລຳບາກ
ຂຸດນ້ຳສ້າງແລະຕັ້ງນ້ຳດື່ມໄວ້ດ້ວຍໃຈທີ່ຜ່ອງແຜ້ວ

[໗໗໔] ຈັກເຂົ້າຈຳອຸໂປສົດສີນເຊິ່ງປະກອບດ້ວຍອົງ ໘
ທຸກມື້ ໑໔ ຄ່ຳ ໑໕ ຄ່ຳແລະ ໘ ຄ່ຳແຫ່ງປັກ
ແລະເມືດມື້ປາຕິຫາຣິຍະປັກ

[໗໗໓] ເຮົາຈັກສັງລວມລະວັງໃນສິນຕະຫຼອດເວລາ
ແລະຈັກບໍ່ລະເລີຍໃນການໃຫ້ທານ
ຍ້ອນຜົນກຳນີ້ ເຮົາໄດ້ເຫັນເອງແລ້ວ
(ພຣະສັງຄີຕິກາຈານກ່າວໄວ້ວ່າ)

[໗໗໔] ນາຍນິຣະຍະບານທັງຫຼາຍຊ່ອຍກັນໂຍນນາງເຣວະດີ
ທີ່ກຳລັງພ່ຳເພີ້ດີ້ນຮົນໄປມາຢູ່ຢ່າງນີ້
ໃຫ້ຕີນຊີ້ຂຶ້ນຫົວດິ່ງລົງໄປໃນນະຣົກອັນເປັນຕາຢ້ານ

(ນາງເຣວະດີໄດ້ກ່າວຄາຖາສຸດທ້າຍອີກວ່າ)

[໗໗໕] ຊາດກ່ອນ ເຮົາເປັນຄົນຂີ້ຖີ່
ດ່າວ່າສະມະນະພາມ
ແລະລວງສາມີດ້ວຍເລື້ອງບໍ່ຈິງ
ຈຶ່ງມົກໄໝ້ໃນນະຣົກທີ່ເປັນຕາຢ້ານ

**ເຣວະຕີວິມານທີ ໔ ຈົບ**

# ๖. ສັດຕະມານະວະກະວິມານ

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ສັດຕະມານົບຜູ້ເຖິງພຣະຣັດຕະນະໄຕຣເປັນສະຣະນະ

(ພຣະຜູ້ມີພຣະພາກເຈົ້າເມື່ອຈະຊົງສະແດງວິທີເຖິງສະຣະນະຄົມແກ່ສັດຕະມານົບຈຶ່ງຕັດວ່າ)

[໗໗໖] ບັນດາຜູ້ກ່າວສອນໃນໝູ່ມະນຸດ
ຜູ້ໃດເປັນຜູ້ປະເສີດສຸດ ເປັນພຣະສາກະຍະມຸນີ
ຈຳແນກພຣະທຳ ສຳເລັດກິດທີ່ຈະຕ້ອງເຮັດແລ້ວ
ເຖິງຝັ່ງພຣະນິບພານ ພ້ອມພຽງດ້ວຍພະລະແລະວິຣິຍະ
ທ່ານຈົ່ງເຖິງຜູ້ນັ້ນຜູ້ເປັນພຣະສຸຄົດເຈົ້າເພື່ອເປັນບ່ອນເພິ່ງບ່ອນຣະນຶກເທີ້ນ

[໗໗໗] ທ່ານຈົ່ງເຖິງພຣະທຳອັນເປັນເຫດຄາຍຣາຄະ
ມີສະພາວະບໍ່ຫວັ່ນໄຫວ ຂາດຄວາມໂສກເສົ້າ
ເປັນສະພາວະທຳທີ່ປາສະຈາກປັດໄຈປຸງແຕ່ງ
ປາສະຈາກສິ່ງເປິເປື້ອນ ໜ້າປາຖະໜາ ລະອຽດອ່ອນ
ເຊິ່ງພຣະຕະຖາຄົດຊົງຈຳແນກໄວ້ແຈ່ມແຈ້ງແລ້ວນີ້
ເພື່ອເປັນບ່ອນເພິ່ງບ່ອນຣະນຶກເທີ້ນ

[໗໗໘] ບັນດິດທັງຫຼາຍກ່າວເຖິງທານທີ່ຖວາຍໃນທ່ານເຫຼົ່າໃດວ່າມີຜົນຫຼາຍ
ທ່ານເຫຼົ່ານັ້ນ ຄືພຣະອະຣິຍະບຸກຄົນຜູ້ບໍລິສຸດ ໔ ຄູ່ ໘ ທ່ານ
ຜູ້ເຫັນປະຈັກໃນທຳ
ທ່ານຈົ່ງເຖິງພຣະອະຣິຍະສົງນີ້ເພື່ອເປັນບ່ອນເພິ່ງບ່ອນຣະນຶກເທີ້ນ

(ພຣະຜູ້ມີພຣະພາກເຈົ້າຕັດຖາມເທບພະບຸດນັ້ນວ່າ)

[໗໗໙] ດວງອາທິດ ດວງຈັນ ດາວເລີກຜຸດສະ ໃນທ້ອງຟ້າ
ຍັງສະຫວ່າງສະໄຫວບໍ່ທຽບທໍ່ວິມານຂອງທ່ານເຊິ່ງສະຫວ່າງສະໄຫວຫຼາຍ
ຫາສິ່ງປຽບທຽບບໍ່ໄດ້ນີ້
ທ່ານເປັນໃຜນໍ ຈາກເທວະໂລກຊັ້ນຕາວະຕິງສາມາຍັງແຜ່ນດິນ

[໗໙໐] ວິມານຂອງທ່ານນັ້ນມີຣັດສະໝີຕັດແສງອາທິດແຜ່ໄປເກີນ ໔໐ ໂຍດ
ແລະເຮັດກາງຄືນໃຫ້ເປັນຄືກາງເວັນ
ວິມານຂອງທ່ານງາມບໍລິສຸດຜຸດຜ່ອງ

[໗໙໑]　　ມີດອກປະທຸມຫຼາຍ ມີດອກບຸນທະຣິກງົດງາມ
ເດຍຣະດາດດ້ວຍດອກໄມ້ນານາຊະນິດ
ງາມບໍ່ໜ້ອຍ ຄຸມໄວ້ດ້ວຍຕາໜ່າງຄໍາອັນບໍລິສຸດ ປາສະຈາກທຸລີ
ສ່ອງສະຫວ່າງຢູ່ໃນອາກາດຄືດວງອາທິດ

[໗໙໒]　　ວິມານຂອງທ່ານເນືອງແໜ້ນດ້ວຍເຫຼົ່າເທບອັບປະສອນ
ຜູ້ຊົງຜ້າກໍາພົນສີແດງແລະສີເຫຼືອງ
ຫອມກະຈາຍດ້ວຍກິ່ນເກດສະໜາ ດອກປະຍົງແລະແກ່ນຈັນ
ມີຜິວພັນຜຸດຜ່ອງດັ່ງຄໍາ ຄືກັບທ້ອງຟ້າເຕັມໄປດ້ວຍດວງດາວ

[໗໙໓]　　ເທບພະບຸດແລະເທບທິດາຈໍານວນຫຼາຍໃນວິມານນີ້
ມີຮູບຮ່າງລັກສະນະຕ່າງ ໆ ກັນ
ມີຈິດໃຈເບີກບານ ຊົງທິບພະອາພອນ ປະດັບດ້ວຍດອກໄມ້ທິບ
ຄຸມດ້ວຍກອງຄໍາ ຫົ່ມດ້ວຍອາພອນຄໍາ
ໂຮຍກິ່ນຫອມຟຸ້ງໄປຕາມລົມ

[໗໙໔]　　ນີ້ເປັນຜົນແຫ່ງກໍາອັນໃດນໍ ຍ້ອນຜົນກໍາອັນໃດນໍ
ທ່ານຈຶ່ງມາເກີດໃນວິມານນີ້ ອັນໜຶ່ງ ຕະຖາຄົດຖາມແລ້ວ
ຂໍທ່ານຈົ່ງບອກເຖິງວິທີທີ່ທ່ານໄດ້ວິມານນີ້ຕາມສົມຄວນແກ່ເຫດນັ້ນເທີ້ນ

(ເທບພະບຸດຂາບທູນວ່າ)

[໗໙໕]　　ພຣະສາດສະດາສະເດັດມາພົບສັດຕະມານົບໃນທາງນີ້
ເມື່ອຈະຊົງອະນຸເຄາະ ຈຶ່ງໄດ້ຊົງພໍ່າສອນ
ມານົບນັ້ນຟັງທໍາຂອງພຣະອົງຜູ້ເປັນຣັດຕະນະອັນປະເສີດແລ້ວ
ໄດ້ຂາບທູນວ່າ ຂ້າພຣະອົງຈັກເຮັດຕາມພຣະດໍາຣັດທີ່ຊົງພໍ່າສອນ

[໗໙໖]　　ຂ້າແດ່ ພຣະອົງຜູ້ຈະເລີນ ຄັ້ງທໍາອິດຂ້າພຣະອົງໄດ້ຂາບທູນວ່າ
ຂ້າພຣະອົງຍັງບໍ່ໄດ້ເຖິງພຣະຊິນະຜູ້ປະເສີດ
ພຣະທໍາແລະພຣະສົງວ່າເປັນບ່ອນເພິ່ງບ່ອນຣະນຶກ
ແຕ່ພາຍຫຼັງໄດ້ເຮັດຕາມພຣະດໍາຣັດຂອງພຣະອົງຕາມທີ່ຊົງພໍ່າສອນນັ້ນແລ

[໗໙໗]　　ອັນໜຶ່ງ ພຣະອົງໄດ້ຕັດສອນວ່າ
ທ່ານຢ່າໄດ້ປະພຶດຕົນເປັນຄົນຂ້າສັດ

ໂດຍວິທີຕ່າງ ໆ ອັນເປັນກຳບໍ່ສະອາດ
ຍ້ອນທ່ານຜູ້ມີປັນຍາທັງຫຼາຍບໍ່ສັນເສີນ
ຄວາມບໍ່ສັງລວມໃນສັດທັງຫຼາຍເລີຍ
ຂ້າແດ່ ພຣະອົງຜູ້ຈະເລີນ ທີ່ທຳອິດຂ້າພຣະອົງໄດ້ຂາບທູນປະຕິເສດ
ແຕ່ພາຍຫຼັງໄດ້ເຮັດຕາມພຣະດຳຣັດຂອງພຣະອົງຕາມທີ່ຕັດສອນນັ້ນແລ

[໙໘໙] ອັນໜຶ່ງ ພຣະອົງໄດ້ຕັດສອນວ່າ
ທ່ານຢ່າສຳຄັນສິ່ງຂອງ
ແມ່ນທີ່ຄົນອື່ນດູແລຮັກສາໄວ້ທີ່ເຂົາບໍ່ໄດ້ໃຫ້ວ່າເປັນຂອງຄວນຖືເອົາ[໑]
ຂ້າແດ່ ພຣະອົງຜູ້ຈະເລີນ ທີ່ທຳອິດຂ້າພຣະອົງໄດ້ຂາບທູນປະຕິເສດ
ແຕ່ພາຍຫຼັງໄດ້ເຮັດຕາມພຣະດຳຣັດຂອງພຣະອົງຕາມທີ່ຕັດສອນນັ້ນແລ

[໙໘໘] ອັນໜຶ່ງ ພຣະອົງໄດ້ຕັດສອນວ່າ
ທ່ານຢ່າໄດ້ລ່ວງລະເມີດຍິງທີ່ຄົນອື່ນຮັກສາ [໒]
ແລະພັນລະຍາຂອງຊາຍອື່ນ[໓] ນັ້ນເປັນສິ່ງບໍ່ປະເສີດ
ຂ້າແດ່ ພຣະອົງຜູ້ຈະເລີນ ທີ່ທຳອິດຂ້າພຣະອົງໄດ້ຂາບທູນປະຕິເສດ
ແຕ່ພາຍຫຼັງໄດ້ເຮັດຕາມພຣະດຳຣັດຂອງພຣະອົງຕາມທີ່ຕັດສອນນັ້ນແລ

[໑໐໐] ອັນໜຶ່ງ ພຣະອົງໄດ້ຕັດສອນວ່າ
ທ່ານຢ່າໄດ້ເວົ້າໃຫ້ຄາດເຄື່ອນຈາກຄວາມຈິງ
ຍ້ອນທ່ານຜູ້ມີປັນຍາທັງຫຼາຍ ບໍ່ສັນເສີນການກ່າວຕົວະ
ຂ້າແດ່ ພຣະອົງຜູ້ຈະເລີນ ທີ່ທຳອິດຂ້າພຣະອົງໄດ້ຂາບທູນປະຕິເສດ
ແຕ່ພາຍຫຼັງໄດ້ເຮັດຕາມພຣະດຳຣັດຂອງພຣະອົງຕາມທີ່ຕັດສອນນັ້ນແລ

[໑໐໑] ອັນໜຶ່ງ ພຣະອົງໄດ້ຕັດສອນວ່າ
ທ່ານຈົ່ງງົດເວັ້ນຂອງມຶນເມົາທຸກຊະນິດ
ອັນເປັນເຫດເຮັດໃຫ້ຄວາມຈຳຂອງຄົນເສື່ອມ
ຂ້າແດ່ພຣະອົງຜູ້ຈະເລີນ ທີ່ທຳອິດຂ້າພຣະອົງໄດ້ຂາບທູນປະຕິເສດ
ແຕ່ພາຍຫຼັງໄດ້ເຮັດຕາມພຣະດຳຣັດຂອງພຣະອົງຕາມທີ່ຕັດສອນນັ້ນແລ

[໑໐໔] ຂ້າພຣະອົງນັ້ນໄດ້ຮັກສາສິກຂາບົດ ໕[໑] ໃນພຣະສາດສະໜານີ້
ປະຕິບັດທຳຂອງພຣະຕະຖາຄົດເຈົ້າ ໄດ້ໄປສູ່ທາງສອງແຍກກາງຊຸມໂຈນ
ພວກໂຈນເຫຼົ່ານັ້ນໄດ້ຂ້າຂ້າພຣະອົງ ຢູ່ບ່ອນນັ້ນ ຍ້ອນໂພຄະເປັນເຫດ
[໑໐໕] ຂ້າພຣະອົງຣະນຶກເຖິງກຸສົນກຳມີປະມານທໍ່ນີ້ນີ້ເອງ

ກຸສົນກຳອື່ນນອກຈາກນັ້ນຂອງຂ້າພຣະອົງບໍ່ມີ
ຍ້ອນສຸດຈະຣິດກຳນັ້ນ  ຂ້າພຣະອົງຈຶ່ງເກີດໃນໝູ່ເທວະດາຊັ້ນຕາວະຕິງສາ
ພັ່ງພ້ອມດ້ວຍກາມມະຄຸນຕາມປາຖະໜາ

[໙໐໔]  ຂໍພຣະອົງໂຜດທອດພຣະເນດ
ຜົນຂອງການສັງລວມພຽງບໍ່ດົນຊົ່ວຍາມ
ດ້ວຍການປະຕິບັດທຳສົມຄວນແກ່ທຳ
ຄົນຫຼວງຫຼາຍຜູ້ມີກຳຕ່ຳຕ້ອຍ ໆ  ພາກັນແນມເບິ່ງ
ນຶກຍິນດີ(ຊົມຊື່ນ)  ຂ້າພຣະອົງ
ຄືບຸກຄົນພາກັນແນມເບິ່ງຜູ້ຮຸ່ງເຮືອງດ້ວຍບໍລິວານຍົດ

[໙໐໕]  ຂໍພຣະອົງໂຜດທອດພຣະເນດເທີ້ນ  ຂ້າພຣະອົງເຖິງສຸກຄະຕິ
ແລະໄດ້ຮັບຄວາມສຸກ  ຍ້ອນພຣະທຳພຽງເລັກໜ້ອຍ
ສ່ວນເຫຼົ່າຊົນທີ່ໄດ້ຟັງທຳຂອງພຣະອົງຢູ່ປະຈຳ
ຄົງຈະໄດ້ສຳຜັດອະມະຕະທຳເຊິ່ງມີຄວາມກະເສມ

[໙໐໖]  ບຸນກຸສົນທີ່ຂ້າພຣະອົງດຳລົງຢູ່ໃນພຣະທຳຄຳສອນຂອງພຣະຕະຖາຄົດເຈົ້າ
ເຮັດແລ້ວເຖິງແມ່ນໜ້ອຍກັບມີຜົນຍິ່ງໃຫຍ່ໄພບູນ
ຂໍພຣະອົງໂຜດທອດພຣະເນດເບິ່ງເທີ້ນ
ຍ້ອນໄດ້ເຮັດບຸນໄວ້  ສັດຕະເທບພະບຸດຈຶ່ງເປ່ງຣັດສະໝີ
ສະຫວ່າງສະໄຫວໄປທົ່ວແຜ່ນດິນ  ຄືດວງອາທິດ

[໙໐໗]  ຊົນຈຳພວກໜຶ່ງປະຊຸມເປີກສາກັນວ່າ
ກຸສົນນີ້ເປັນແນວໃດ?
ພວກເຮົາຈະພ່ຳເພັງກຸສົນນັ້ນແນວໃດ
ພວກເຮົານັ້ນໄດ້ເກີດເປັນມະນຸດແລ້ວ
ເພິ່ງປະຕິບັດທຳ  ຢູ່ຮັກສາສີນກັນອີກເທີ້ນ

[໙໐໘]  ພຣະສາດສະດາຊົງມີອຸປະກາຣະຫຼາຍ
ແລະຊົງອະນຸເຄາະຂ້າພຣະອົງແນວນີ້
ໃນເມື່ອຂ້າພຣະອົງຍັງມີຊີວິດຢູ່
ໄດ້ສະເດັດໄປແຕ່ຍັງເວັນຢູ່ເລີຍ
ຂ້າພຣະອົງນັ້ນໄດ້ເຂົ້າໄປເຝົ້າພຣະອົງຜູ້ຊົງມີພຣະນາມເປັນສັດຈະທຳ
ຂໍພຣະອົງໂຜດອະນຸເຄາະເທີ້ນ
ຂ້າພຣະອົງຂໍຟັງທຳຊ້ຳອີກ

[໗໐໗] ຊົນເຫຼົ່າໃດໃນພຣະສາດສະໜານີ້ລະການຣາຄານຸໄສ
ແລະພະວະຣາຄານຸໄສ°ໄດ້ຍ້ອນລະໂມຫະໄດ້ຂາດ
ຊົນເຫຼົ່ານັ້ນແລຍ່ອມບໍ່ເຂົ້າເຖິງການນອນໃນທ້ອງອີກຕໍ່ໄປ
ຍ້ອນວ່າເປັນຜູ້ເຖິງຄວາມດັບທີ່ໝົດສິ້ນເຢັນສະນິດແລ້ວ ໔

**ສັດຕະມານະວະກະວິມານທີ ໗ ຈົບ**

# ໘. ກັກກະຕະກະຣະສະທາຍະກະວິມານ

# ວ່າດ້ວຍວິມານທີ່ເກີດຂຶ້ນແກ່ຄົນເຝົ້ານາຜູ້ຖວາຍແກງປູ

(ພຣະມະຫາໂມກຄັນລານະເຖຣະຖາມເທບພະບຸດອົງໜຶ່ງວ່າ)

[໗໑໐] ວິມານມີເສົາເຮັດດ້ວຍແກ້ວມະນີນີ້ສູງຫຼາຍ ວັດໂດຍຮອບໄດ້ ໑໒ ໂຍດ
ເປັນຜາສາດ ກ໐໐ ຍອດ ເບິ່ງໂອລານ ມີເສົາປະດິດດ້ວຍແກ້ວໄພທູນ
ມີພື້ນປູລາດດ້ວຍແຜ່ນຄຳສວຍງາມ

[໗໑໑] ທ່ານສະຖິດ ດື່ມ ກິນຢູ່ໃນວິມານນັ້ນ
ມີຫວຍເທບພາກັນບັນເລງພິນທິບດັງມ່ວນ
ໃນວິມານຂອງທ່ານນີ້ ມີປັນຈະການະຄຸນອັນເປັນທິບຣົດ
ແລະເຫຼົ່າເທບນາຣີປະດັບດ້ວຍອາພອນຄຳຟ້ອນລຳຢູ່

[໗໑໒] ຍ້ອນບຸນອັນໃດທ່ານຈຶ່ງມີຜິວພັນງາມແນວນີ້
ຜົນອັນເພິ່ງປາຖະໜາຈຶ່ງສຳເລັດແກ່ທ່ານໃນວິມານນີ້
ແລະໂພຄະທັງມວນລ້ວນໜ້າພໍໃຈຈຶ່ງເກີດຂຶ້ນແກ່ທ່ານ

[໗໑໓] ເທວະດາຜູ້ມີອານຸພາບຫຼາຍ ອາດຕະມາຂໍຖາມວ່າ
ເມື່ອທ່ານເກີດເປັນມະນຸດໄດ້ເຮັດບຸນອັນໃດໄວ້
ຍ້ອນບຸນອັນໃດທ່ານຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້
[໗໑໔] ເທບພະບຸດນັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ
ຈຶ່ງຕອບບັນຫາຜົນກຳໄປຕາມທີ່ພຣະເຖຣະຖາມວ່າ

[໗໑໕] ປູຄຳມີ ໑໐ ຂາ ຢູ່ທີ່ປະຕູ
ຖ້າເຕືອນສະຕິໃຫ້ຣະນຶກໄດ້°ຍ່ອມງາມຮຸ່ງເຮືອງ

[໗໑໖] ຍ້ອນບຸນນັ້ນຂ້ານ້ອຍຈຶ່ງມີຜິວພັນງາມແບບນີ້
ຜົນອັນເພິ່ງປາຖະໜາຈຶ່ງສຳເລັດແກ່ຂ້ານ້ອຍໃນວິມານນີ້
ແລະໂພຄະທັງມວນລ້ວນໜ້າພໍໃຈຈຶ່ງເກີດຂຶ້ນແກ່ຂ້ານ້ອຍ

[໗໑໗] ຂ້າແດ່ພິກຂຸຜູ້ມີອານຸພາບຫຼາຍ ຂ້ານ້ອຍຂໍຂາບຮຽນວ່າ
ຍ້ອນບຸນທີ່ໄດ້ເຮັດໄວ້ສະໄໝເມື່ອເກີດເປັນມະນຸດ
ຂ້ານ້ອຍຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແບບນີ້

**ພັກກະຕະກະຣະສະທາຍະກະວິມານທີ ໔ ຈົບ**

(ອີກ ໕ ວິມານຕໍ່ໄປນີ້ ເພິ່ງໃຫ້ພິດສະດານຄືພັກກະຕະກະຣະສະທາຍະກະວິມານ)

# ໕. ທະວາຣະປາລະວິມານ

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ຄົນເຝົ້າປະຕູຜູ້ຮູ້ກຊວນຄົນເຮັດບຸນ

(ພຣະມະຫາໂມກຄັນລານະເຖຣະຖາມເທບພະບຸດອົງໜຶ່ງວ່າ)

[໗໑໘] ວິມານມີເສົາເຮັດດ້ວຍແກ້ວມະນີນີ້ສູງຫຼາຍ ວັດໂດຍຮອບໄດ້ ໑໒ ໂຍດ
ເປັນຜາສາດ ໗໐໐ ຍອດ ເບິ່ງໂອລານ ມີເສົາປະດິດດ້ວຍແກ້ວໄພທູນ
ມີພື້ນປູລາດດ້ວຍແຜ່ນຄຳສວຍງາມ

[໗໑໙] ທ່ານສະຖິດ ດື່ມ ກິນ ຢູ່ໃນວິມານນັ້ນ
ມີຫວຍເທບພາກັນບັນເລງພິນທິບດັງມ່ວນ
ໃນວິມານຂອງທ່ານນີ້ມີປັນຈະກາມະຄຸນອັນເປັນທິບຣົດ
ແລະເຫຼົ່າເທບນາຣີປະດັບດ້ວຍອາພອນຄຳຟ້ອນລຳຢູ່

[໗໒໐] ຍ້ອນບຸນອັນໃດທ່ານຈຶ່ງມີຜິວພັນງາມແບບນີ້
ຜົນອັນເພິ່ງປາຖະໜາຈຶ່ງສຳເລັດແກ່ທ່ານໃນວິມານນີ້
ແລະໂພຄະທັງມວນລ້ວນໜ້າພໍໃຈຈຶ່ງເກີດຂຶ້ນແກ່ທ່ານ

[໗໒໑] ເທວະດາຜູ້ມີອານຸພາບຫຼາຍ ອາດຕະມາຂໍຖາມວ່າ
ເມື່ອທ່ານເກີດເປັນມະນຸດໄດ້ເຮັດບຸນອັນໃດໄວ້
ຍ້ອນບຸນອັນໃດທ່ານຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແບບນີ້

[໙໔໘] ເທບພະບຸດນັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ
ຈຶ່ງຕອບບັນຫາຜົນກຳໄປຕາມທີ່ພຣະເຖຣະຖາມວ່າ

[໙໔໑] ຂ້ານ້ອຍມີອາຍຸ ໑,໐໐໐ ປີທິບ
ບຸກຄົນຜູ້ເຮັດບຸນດ້ວຍເພດພຽງກ່າວເຊື້ອເຊີນແລະເຮັດໃຈໃຫ້ເຫຼື້ອມໃສ
ຈັກດຳລົງຢູ່ພັ່ງພ້ອມດ້ວຍກາມມະຄຸນທັງຫຼາຍອັນເປັນທິບ

[໙໔໔] ຍ້ອນບຸນນັ້ນຂ້ານ້ອຍຈຶ່ງມີຜິວພັນງາມແນວນີ້
ຜົນອັນເພິ່ງປາຖະໜາຈຶ່ງສຳເລັດແກ່ຂ້ານ້ອຍໃນວິມານນີ້
ແລະໂພຄະທັງມວນລ້ວນໜ້າພໍໃຈຈຶ່ງເກີດຂຶ້ນແກ່ຂ້ານ້ອຍ

[໙໔໕] ຂ້າແດ່ ພິກຂຸຜູ້ມີອານຸພາບຫຼາຍ ຂ້ານ້ອຍຂໍຂາບຮຽນວ່າ
ຍ້ອນບຸນທີ່ໄດ້ເຮັດໄວ້ສະໄໝເມື່ອເກີດເປັນມະນຸດ
ຂ້ານ້ອຍຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

**ທະວາຣະປາລະວິມານທີ ໕ ຈົບ**

## ໖. ປະຖົມກະຣະນີຍະວິມານ
## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ອຸປາສິກາຜູ້ຮູ້ກິດທີ່ຄວນເຮັດ ເລື້ອງທີ ໑

(ພຣະມະຫາໂມກຄັນລານະເຖຣະຖາມເທບພະບຸດອົງໜຶ່ງວ່າ)

[໙໔໖] ວິມານມີເສົາເຮັດດ້ວຍແກ້ວມະນີນີ້ສູງຫຼາຍ ວັດໂດຍຮອບໄດ້ ໑໔ ໂຍດ
ເປັນຜາສາດ ໗໐໐ ຍອດ ເບິ່ງໂອລານ ມີເສົາປະດິດດ້ວຍແກ້ວໄພທູນ
ມີພື້ນປູລາດດ້ວຍແຜ່ນຄຳສວຍງາມ

[໙໔໗] ທ່ານສະຖິດ ດື່ມ ກິນ ຢູ່ໃນວິມານນັ້ນ
ມີຫວຍເທບພາກັນບັນເລງພິນທິບດັງມ່ວນ
ໃນວິມານຂອງທ່ານນີ້ມີປັນຈະກາມະຄຸນອັນເປັນທິບຣົດ
ແລະເຫຼົ່າເທບນາຣີປະດັບດ້ວຍອາພອນຄຳຟ້ອນລຳຢູ່

[໙໔໘] ຍ້ອນບຸນອັນໃດທ່ານຈຶ່ງມີຜິວພັນງາມແນວນີ້
ຜົນອັນເພິ່ງປາຖະໜາຈຶ່ງສຳເລັດແກ່ທ່ານໃນວິມານນີ້
ແລະໂພຄະທັງມວນລ້ວນໜ້າພໍໃຈຈຶ່ງເກີດຂຶ້ນແກ່ທ່ານ

[໗໘໗] ເທວະດາຜູ້ມີອານຸພາບຫຼາຍ ອາດຕະມາຂໍຖາມວ່າ
ເມື່ອທ່ານເກີດເປັນມະນຸດໄດ້ເຮັດບຸນອັນໃດໄວ້
ຍ້ອນບຸນອັນໃດທ່ານຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

[໗໙໐] ເທບພະບຸດນັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ
ຈຶ່ງຕອບບັນຫາຜົນກຳໄປຕາມທີ່ພຣະເຖຣະຖາມວ່າ

[໗໙໑] ບັນດິດຜູ້ຮູ້ແຈ້ງເພິ່ງພ່ຳເພັງບຸນຕ່າງ ໆ
ໃນພຣະສຳມາສຳພຸດທະເຈົ້າທັງຫຼາຍຜູ້ສະເດັດໄປໂດຍຖືກຕ້ອງແລ້ວ
ເຊິ່ງເປັນບຸນຍະເຂດທີ່ໃຜ ໆ ຖວາຍທານແລ້ວມີຜົນຫຼາຍ

[໗໙໒] ຂ້ານ້ອຍເຮັດຈິດໃຫ້ເຫຼື້ອມໃສໃນພຣະພຸດທະອົງວ່າ
ພຣະສຳມາສຳພຸດທະເຈົ້າສະເດັດຈາກປ່າມາຍັງໝູ່ບ້ານ
ເພື່ອປະໂຫຍດແກ່ເຮົານໍ ດັ່ງນີ້ແລ້ວ
ຈຶ່ງໄດ້ມາອຸບັດໃນໝູ່ເທບຊັ້ນຕາວະຕິງສາ

[໗໙໓] ຍ້ອນບຸນນັ້ນຂ້ານ້ອຍຈຶ່ງມີຜິວພັນງາມແນວນີ້
ຜົນອັນເພິ່ງປາຖະໜາຈຶ່ງສຳເລັດແກ່ຂ້ານ້ອຍໃນວິມານນີ້
ແລະໂພຄະທັງມວນລ້ວນໜ້າພໍໃຈຈຶ່ງເກີດຂຶ້ນແກ່ຂ້ານ້ອຍ

[໗໙໔] ຂ້າແດ່ ພິກຂຸຜູ້ມີອານຸພາບຫຼາຍ ຂ້ານ້ອຍຂໍຂາບຮຽນວ່າ
ຍ້ອນບຸນທີ່ໄດ້ເຮັດໄວ້ສະໄໝເມື່ອເກີດເປັນມະນຸດ
ຂ້ານ້ອຍຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

**ປະຖົມກະຣະນີຍະວິມານທີ ໖ ຈົບ**

## ໗. ທຸຕິຍະກະຣະນີຍະວິມານ

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ອຸປາສິກາຜູ້ຮູ້ກິດທີ່ຄວນເຮັດ ເລື້ອງທີ ໘

(ພຣະມະຫາໂມກຄັນລານະເຖຣະຖາມເທບພະບຸດອົງໜຶ່ງວ່າ)

[໗໙໕] ວິມານມີເສົາເຮັດດ້ວຍແກ້ວມະນີນີ້ສູງຫຼາຍ ວັດໂດຍຮອບໄດ້ ໑໔ ໂຍດ

ເປັນຜາສາດ ໗໐໐ ຍອດ ເບິ່ງໂອລານ ມີເສົາປະດິດດ້ວຍແກ້ວໄພທູນ
ມີພື້ນປູລາດດ້ວຍແຜ່ນຄໍາສວຍງາມ

[໗໖໖] ທ່ານສະຖິດ ດື່ມ ກິນ ຢູ່ໃນວິມານນັ້ນ
ມີຫວຍເທບພາກັນບັນເລງພິນທິບດັງມ່ວນ
ໃນວິມານຂອງທ່ານນີ້ມີປັນຈະກາມະຄຸນອັນເປັນທິບຣົດ
ແລະເຫຼົ່າເທບນາຣີປະດັບດ້ວຍອາພອນຄໍາຟ້ອນລໍາຢູ່

[໗໖໗] ຍ້ອນບຸນອັນໃດທ່ານຈຶ່ງມີຜິວພັນງາມແນວນີ້
ຜົນອັນເພິ່ງປາຖະໜາຈຶ່ງສໍາເລັດແກ່ທ່ານໃນວິມານນີ້
ແລະໂພຄະທັງມວນລ້ວນໜ້າພໍໃຈຈຶ່ງເກີດຂຶ້ນແກ່ທ່ານ

[໗໖໘] ເທວະດາຜູ້ມີອານຸພາບຫຼາຍ ອາດຕະມາຂໍຖາມວ່າ
ເມື່ອທ່ານເກີດເປັນມະນຸດໄດ້ເຮັດບຸນອັນໃດໄວ້
ຍ້ອນບຸນອັນໃດທ່ານຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

[໗໖໙] ເທບພະບຸດນັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ
ຈຶ່ງຕອບບັນຫາຜົນກໍາໄປຕາມທີ່ພຣະເຖຣະຖາມວ່າ

[໗໘໐] ບັນດິດຜູ້ຮູ້ແຈ້ງເພິ່ງພໍ່າເພັງບຸນຕ່າງ ໆ
ໃນພິກຂຸທັງຫຼາຍຜູ້ປະຕິບັດຖືກ
ເຊິ່ງເປັນບຸນຍະເຂດທີ່ໃຜ ໆ ຖວາຍທານແລ້ວມີຜົນຫຼາຍ

[໗໘໑] ຂ້ານ້ອຍເຮັດຈິດໃຫ້ເຫຼື້ອມໃສໃນພິກຂຸນັ້ນວ່າ
ພິກຂຸອອກຈາກປ່າເຂົ້າມາຍັງໝູ່ບ້ານເພື່ອປະໂຫຍດແກ່ເຮົານໍ
ດັ່ງນີ້ແລ້ວຈຶ່ງໄດ້ມາອຸບັດໃນໝູ່ເທບຊັ້ນຕາວະຕິງສາ

[໗໘໒] ຍ້ອນບຸນນັ້ນຂ້ານ້ອຍຈຶ່ງມີຜິວພັນງາມແນວນີ້
ຜົນອັນເພິ່ງປາຖະໜາຈຶ່ງສໍາເລັດແກ່ຂ້ານ້ອຍໃນວິມານນີ້
ແລະໂພຄະທັງມວນລ້ວນໜ້າພໍໃຈຈຶ່ງເກີດຂຶ້ນແກ່ຂ້ານ້ອຍ

[໗໘໓] ຂ້າແດ່ພິກຂຸຜູ້ມີອານຸພາບຫຼາຍ ຂ້ານ້ອຍຂໍຂາບຮຽນວ່າ
ຍ້ອນບຸນທີ່ໄດ້ເຮັດໄວ້ສະໄໝເມື່ອເກີດເປັນມະນຸດ
ຂ້ານ້ອຍຈຶ່ງມີອານຸພາບຮຸ່ງເຮືອງ

ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

**ທຸຕິຍະກະຣະນີຍະວິມານທີ ໗ ຈົບ**

# ໙. ປະຖົມສູຈິວິມານ

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ບຸຣຸດຜູ້ຖວາຍເຂັມ ເລື້ອງທີ ໑

(ພຣະມະຫາໂມກຄັນລານະເຖຣະຖາມເທບພະບຸດອົງໜຶ່ງວ່າ)

[໙໘໔] ວິມານມີເສົາເຮັດດ້ວຍແກ້ວມະນີນີ້ສູງຫຼາຍ ວັດໂດຍຮອບໄດ້ ໑໘ ໂຍດ
ເປັນຜາສາດ ໗໐໐ ຍອດ ເບິ່ງໂອລານ ມີເສົາປະດິດດ້ວຍແກ້ວໄພທູນ
ມີພື້ນປູລາດດ້ວຍແຜ່ນຄຳສວຍງາມ

[໙໘໕] ທ່ານສະຖິດ ດື່ມ ກິນ ຢູ່ໃນວິມານນັ້ນ
ມີຫວຍເທບພາກັນບັນເລງພິນທິບດັງມ່ວນ
ໃນວິມານຂອງທ່ານນີ້ມີປັນຈະກາມະຄຸນອັນເປັນທິບຣົດ
ແລະເຫຼົ່າເທບນາຣີປະດັບດ້ວຍອາພອນຄຳຟ້ອນລຳຢູ່

[໙໘໖] ຍ້ອນບຸນອັນໃດທ່ານຈຶ່ງມີຜິວພັນງາມແນວນີ້
ຜົນອັນເພິ່ງປາຖະໜາຈຶ່ງສຳເລັດແກ່ທ່ານໃນວິມານນີ້
ແລະໂພຄະທັງມວນລ້ວນໜ້າພໍໃຈຈຶ່ງເກີດຂຶ້ນແກ່ທ່ານ

[໙໘໗] ເທວະດາຜູ້ມີອານຸພາບຫຼາຍ ອາດຕະມາຂໍຖາມວ່າ
ເມື່ອທ່ານເກີດເປັນມະນຸດໄດ້ເຮັດບຸນອັນໃດໄວ້
ຍ້ອນບຸນອັນໃດທ່ານຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

[໙໘໙] ເທບພະບຸດນັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ
ຈຶ່ງຕອບບັນຫາຜົນກຳໄປຕາມທີ່ພຣະເຖຣະຖາມວ່າ

[໙໘໙] ທານທີ່ຂ້ານ້ອຍຖວາຍມາ(ກ່ອນ)ນັ້ນບໍ່ມີຜົນ
ທານທີ່ຈະຖວາຍຄວນເປັນຂອງດີ
ເຂັມທີ່ຂ້ານ້ອຍຖວາຍໄປແລ້ວນັ້ນແລເປັນຂອງດີ

[໙໕໐] ຍ້ອນບຸນນັ້ນຂ້ານ້ອຍຈຶ່ງມີຜິວພັນງາມແນວນີ້

ຜົນອັນເພິ່ງປາຖະໜາຈຶ່ງສຳເລັດແກ່ຂ້ານ້ອຍໃນວິມານນີ້
ແລະໂພຄະທັງມວນລ້ວນໜ້າພໍໃຈຈຶ່ງເກີດຂຶ້ນແກ່ຂ້ານ້ອຍ

[໙໕໑] ຂ້າແດ່ ພິກຂຸຜູ້ມີອານຸພາບຫຼາຍ ຂ້ານ້ອຍຂໍຂາບຮຽນວ່າ
ຍ້ອນບຸນທີ່ໄດ້ເຮັດໄວ້ສະໄໝເມື່ອເກີດເປັນມະນຸດ
ຂ້ານ້ອຍຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

**ປະຖົມສູຈິວິມານທີ ๗ ຈົບ**

## ໙. ທຸຕິຍະສູຈິວິມານ
## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ບຸຣຸດຜູ້ຖວາຍເຂັມ ເລື່ອງທີ ໘

(ພຣະມະຫາໂມກຄັນລານະເຖຣະຖາມເທບພະບຸດອົງໜຶ່ງວ່າ)

[໙໕໘] ວິມານມີເສົາເຮັດດ້ວຍແກ້ວມະນີນີ້ສູງຫຼາຍ ວັດໂດຍຮອບໄດ້ ໑໘ ໂຍດ
ເປັນຜາສາດ ๗໐໐ ຍອດ ເບິ່ງໂອລານ ມີເສົາປະດັດດ້ວຍແກ້ວໄພທູນ
ມີພື້ນປູລາດດ້ວຍແຜ່ນຄຳສວຍງາມ

[໙໕໙] ທ່ານສະຖິດ ດື່ມ ກິນ ຢູ່ໃນວິມານນັ້ນ
ມີຫວຍເທບພາກັນບັນເລງພິນທິບດັງມ່ວນ
ໃນວິມານຂອງທ່ານນີ້ມີປັນຈະກາມະຄຸນອັນເປັນທິບຣົດ
ແລະເຫຼົ່າເທບນາຣີຜູ້ປະດັບດ້ວຍອາພອນຄຳຟ້ອນລຳຢູ່

[໙໕໔] ຍ້ອນບຸນອັນໃດທ່ານຈຶ່ງມີຜິວພັນງາມແນວນີ້
ຜົນອັນເພິ່ງປາຖະໜາຈຶ່ງສຳເລັດແກ່ທ່ານໃນວິມານນີ້
ແລະໂພຄະທັງມວນລ້ວນໜ້າພໍໃຈຈຶ່ງເກີດຂຶ້ນແກ່ທ່ານ

[໙໕໕] ເທວະດາຜູ້ມີອານຸພາບຫຼາຍ ອາດຕະມາຂໍຖາມວ່າ
ເມື່ອທ່ານເກີດເປັນມະນຸດໄດ້ເຮັດບຸນອັນໃດໄວ້
ຍ້ອນບຸນອັນໃດທ່ານຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

[໙໕໖] ເທບພະບຸດນັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ
ຈຶ່ງຕອບບັນຫາຜົນກຳໄປຕາມທີ່ພຣະເຖຣະຖາມວ່າ

[໙໕໗] ຊາດກ່ອນຂ້ານ້ອຍເກີດເປັນມະນຸດຢູ່ໃນໝູ່ມະນຸດໃນມະນຸດສາໂລກ
[໙໕໘] ໄດ້ເຫັນພິກຂຸຜູ້ປາສະຈາກກິເລດເໝືອນທຸລີ ມີໃຈຜ່ອງໃສ ບໍ່ມົວໝອງ
ເຫຼື້ອມໃສແລ້ວ ໄດ້ຖວາຍເຂັມແດ່ທ່ານດ້ວຍມືທັງສອງຂອງຕົນ

[໙໕໙] ຍ້ອນບຸນນັ້ນຂ້ານ້ອຍຈຶ່ງມີຜິວພັນງາມແນວນີ້
ຜົນອັນເພິ່ງປາຖະໜາຈຶ່ງສຳເລັດແກ່ຂ້ານ້ອຍໃນວິມານນີ້
ແລະໂພຄະທັງມວນລ້ວນໜ້າພໍໃຈຈຶ່ງເກີດຂຶ້ນແກ່ຂ້ານ້ອຍ

[໙໖໐] ຂ້າແດ່ພິກຂຸຜູ້ມີອານຸພາບຫຼາຍ ຂ້ານ້ອຍຂໍຂາບຮຽນວ່າ
ຍ້ອນບຸນທີ່ໄດ້ເຮັດໄວ້ສະໄໝເມື່ອເກີດເປັນມະນຸດ
ຂ້ານ້ອຍຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

**ທຸຕິຍະສູຈິວິມານທີ ໙ ຈົບ**

## ໑໐. ປະຖົມນາຄະວິມານ
## ວ່າດ້ວຍວິມານທີ່ມີຊ້າງທົບເປັນພາຫະນະ ເລື້ອງທີ ໑

(ພຣະມະຫາໂມກຄັນລານະເຖຣະຖາມເທບພະບຸດອົງໜຶ່ງວ່າ)

[໙໖໑] ທ່ານຂີ່ຊ້າງເຜືອກຜ່ອງ ບໍ່ມີຕຳໜິ ມີງາງອນງາມ ຊົງພະລັງ
ໄປໄດ້ໄວຫຼາຍ ເປັນຄົດຊະສານປະເສີດ ຄວນແກ່ການຂັບຂີ່
ມັດສາຍຮັດຜະສົມຄຳໄວ້ຮຽບຮ້ອຍ ເທາະມາບ່ອນນີ້

[໙໖໒] ທີ່ງາທັງສອງຂອງພະຍາຄົດຊະສານລ້ວນມີສະໂບກຂະຣະນີເນຣະມິດ
ມີນ້ຳໃສສະອາດ ເດຍລະດາດດ້ວຍປະທຸມະຊາດມີດອກບານເດຍລະດາດ
ໃນດອກບົວຫຼວງທຸກ ໆ ດອກມີໝູ່ດຸຣິຍະເທບບັນເລງເພງ
ແລະມີເຫຼົ່າເທບອັບປະສອນນີ້ຟ້ອນລຳຊວນໃຫ້ເກີດຄວາມມ່ວນຊື່ນບັນເທີງໃຈ

[໙໖໓] ທ່ານໄດ້ບັນລຸເທວະລິດ ມີອານຸພາບຫຼາຍ
ເມື່ອທ່ານເກີດເປັນມະນຸດໄດ້ເຮັດບຸນອັນໃດໄວ້
ຍ້ອນບຸນອັນໃດທ່ານຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

[໙໖໔] ເທບພະບຸດນັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ

ຈຶ່ງຕອບບັນຫາຜົນກຳໄປຕາມທີ່ພຣະເຖຣະຖາມວ່າ

[໙໒໕]　ຂ້ານ້ອຍເຫຼື້ອມໃສແລ້ວ ໄດ້ນຳດອກໄມ້ແປດກຳມືທີ່ນັ້ນ
ໄປບູຊາທີ່ພຣະສະຖູບຂອງພຣະຜູ້ມີພຣະພາກເຈົ້າຊົງພຣະນາມວ່າກັດສະປະ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່(ຄືນິບພານ)ດ້ວຍມືທັງສອງຂອງຕົນ

[໙໒໖]　ຍ້ອນບຸນນັ້ນຂ້ານ້ອຍຈຶ່ງມີຜິວພັນງາມແນວນີ້
ຜົນອັນເພິ່ງປາຖະໜາຈຶ່ງສຳເລັດແກ່ຂ້ານ້ອຍໃນວິມານນີ້
ແລະໂພຄະທັງມວນລ້ວນໜ້າພໍໃຈບັງເກີດແກ່ຂ້ານ້ອຍ

[໙໒໗]　ຂ້າແດ່ພິກຂຸຜູ້ມີອານຸພາບຫຼາຍ ຂ້ານ້ອຍຂໍຂາບຮຽນວ່າ
ຍ້ອນບຸນທີ່ໄດ້ເຮັດໄວ້ສະໄໝເມື່ອເກີດເປັນມະນຸດ
ຂ້ານ້ອຍຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

**ປະຖົມນາຄະວິມານທີ ໑໐ ຈົບ**

## ໑໑. ທຸຕິຍະນາຄະວິມານ

## ວ່າດ້ວຍວິມານທີ່ມີຊ້າງທີບເປັນພາຫະນະ ເລື້ອງທີ ໔

(ພຣະມະຫາໂມກຄັນລານະເຖຣະຖາມເທບພະບຸດອົງໜຶ່ງວ່າ)

[໙໒໘]　ທ່ານຊົງຊ້າງໃຫຍ່ເຜືອກປອດ ເປັນຄົດຊະສານປະເສີດ
ຫ້ອມລ້ອມດ້ວຍໝູ່ເທບອັບປະສອນ ທ່ຽວວົນວຽນຢູ່ຕາມປ່າ
ເປ່ງຣັດສະໝີສະຫວ່າງສະໄຫວໄປທົ່ວທຸກທິດຢູ່ ຄືດາວປະກາຍພຶກ

[໙໒໙]　ຍ້ອນບຸນອັນໃດທ່ານຈຶ່ງມີຜິວພັນງາມແນວນີ້
ຜົນອັນເພິ່ງປາຖະໜາຈຶ່ງສຳເລັດແກ່ທ່ານໃນວິມານນີ້
ແລະໂພຄະທັງມວນລ້ວນໜ້າພໍໃຈຈຶ່ງເກີດຂຶ້ນແກ່ທ່ານ

[໙໓໐]　ເທວະດາຜູ້ມີອານຸພາບຫຼາຍ ອາດຕະມາຂໍຖາມວ່າ
ເມື່ອທ່ານເກີດເປັນມະນຸດໄດ້ເຮັດບຸນອັນໃດໄວ້
ຍ້ອນບຸນອັນໃດທ່ານຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

[໙໗໑] ເທບພະບຸດນັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ
ຈຶ່ງຕອບບັນຫາຜົນກຳໄປຕາມທີ່ພຣະເຖຣະຖາມວ່າ

[໙໗໘] ເມື່ອຂ້ານ້ອຍເກີດເປັນມະນຸດຢູ່ໃນໝູ່ມະນຸດ
ເປັນອຸປາສົກຂອງພຣະພຸດທະເຈົ້າຜູ້ຊົງມີພຣະຈັກຂຸ
ໄດ້ງົດເວັ້ນຈາກການຂ້າສັດ ງົດເວັ້ນຈາກລັກຊັບໃນໂລກ

[໙໗໙] ຍິນດີສະເພາະພັນລະຍາຂອງຕົນ ບໍ່ກ່າວຕົວະ ແລະບໍ່ດື່ມນ້ຳເມົາ
ມີຈິດເຫຼື້ອມໃສ ໄດ້ຖວາຍເຂົ້າແລະນ້ຳເປັນທານອັນໄພບູນໂດຍເຄົາລົບ

[໙໗໔] ຍ້ອນບຸນນັ້ນຂ້ານ້ອຍຈຶ່ງມີຜິວພັນງາມແນວນີ້
ຜົນອັນເພິ່ງປາຖະໜາຈຶ່ງສຳເລັດແກ່ຂ້ານ້ອຍໃນວິມານນີ້
ແລະໂພຄະທັງມວນລ້ວນໜ້າພໍໃຈຈຶ່ງເກີດຂຶ້ນແກ່ຂ້ານ້ອຍ

[໙໗໕] ຂ້າແດ່ພິກຂຸຜູ້ມີອານຸພາບຫຼາຍ ຂ້ານ້ອຍຂໍຂາບຮຽນວ່າ
ຍ້ອນບຸນທີ່ໄດ້ເຮັດໄວ້ເມື່ອເກີດເປັນມະນຸດ
ຂ້ານ້ອຍຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

**ທຸຕິຍະນາຄະວິມານທີ ໑໑ ຈົບ**

## ໑໘. ຕະຕິຍະນາຄະວິມານ

## ວ່າດ້ວຍວິມານທີ່ມີຊ້າງທິບເປັນພາຫະນະ ເລື້ອງທີ ໓

(ບຸຣຸດຜູ້ເປັນບັນດິດຖາມເທບພະບຸດອົງໜຶ່ງວ່າ)

[໙໗໖] ໃຜນໍ ມີຊ້າງເຜືອກປອດເປັນຍານທິບ
ມີສຽງດົນຕີບັນເລັງກຶກກ້ອງ
ມີບໍລິວານຫຼວງຫຼາຍບູຊາຢູ່ໃນອາກາດ

[໙໗໗] ທ່ານເປັນເທວະດາຫຼືຄົນທັບ ຫຼືເປັນທ້າວສັກກະປຸຣິນທະທະ
ພວກເຮົາບໍ່ຮູ້ຈັກ ຈຶ່ງຂໍຖາມທ່ານ
ພວກເຮົາຈະຮູ້ຈັກທ່ານໄດ້ແນວໃດ

(ເທບພະບຸດກ່າວວ່າ)

[໒໗໘] ເຮົາບໍ່ແມ່ນເທວະດາ ບໍ່ແມ່ນຄົນທັນ
ທັງບໍ່ແມ່ນທ້າວສັກກະປຸຣິນທະທະ
ແຕ່ເຮົາເປັນເທບພະບຸດອົງໜຶ່ງໃນບັນດາເຫຼົ່າເທບຊາວສຸທຳມາ

(ບຸຣຸດຜູ້ເປັນບັນດິດຖາມວ່າ)

[໒໗໙] ເທບຊາວສຸທຳມາ ເຮົາຂໍຖາມວ່າ
ຄົນເຮັດກຳອັນໃດໄວ້ສະໄໝເປັນມະນຸດ
ຈຶ່ງຈະເກີດເປັນເທບຊາວສຸທຳມາໄດ້

(ເທບພະບຸດກ່າວວ່າ)

[໒໘໐] ຜູ້ໃດເພິ່ງຖວາຍອາຄານມຸງບັງດ້ວຍໃບອ້ອຍ
ອາຄານມຸງບັງດ້ວຍຫຍ້າ ແລະອາຄານມຸງບັງດ້ວຍຜ້າ
ຜູ້ນັ້ນເມື່ອຖວາຍອາຄານແນວໃດແນວໜຶ່ງໃນອາຄານສາມແນວແລ້ວ
ຈຶ່ງຈະເກີດເປັນເທບຊາວສຸທຳມາໄດ້

ຕະຕິຍະນາຄະວິມານທີ ໑໘ ຈົບ

## ໑໙. ຈູລະຣະຖະວິມານ
## ວ່າດ້ວຍວິມານທີ່ມີລົດທີບຄັນນ້ອຍເປັນພາຫະນະເກີດຂຶ້ນແກ່ສຸຊາດກຸມານ

(ພຣະມະຫາກັດຈາຍະນະເຖຣະທູນຖາມສຸຊາດກຸມານວ່າ)

[໒໘໑] ນາຍຂະມັງທະນູ ທ່ານຢືນປິດທະນູໄມ້ແກ່ນອັນປະເສີດຢູ່
ທ່ານເປັນກະສັດຫຼືຣາດຊະກຸມານ ຫຼືເປັນພານປ່າ

(ສຸຊາດກຸມານຕັດຕອບວ່າ)

[໒໘໒] ພຣະຜູ້ເປັນເຈົ້າຜູ້ຈະເລີນ
ຂ້ານ້ອຍເປັນຣາດຊະໂອຣົດຂອງພຣະເຈົ້າອັດສະກະ
ທ່ຽວໄປໃນປ່າ ພິກຂຸ ຂ້ານ້ອຍຂໍບອກນາມແກ່ທ່ານ
ຊົນທັງຫຼາຍຮູ້ຈັກຂ້ານ້ອຍວ່າ ສຸຊາດ

[໒໘໓] ຂ້ານ້ອຍທ່ຽວລັດເລາະໄປສູ່ປ່າໃຫຍ່ ເສາະຫາໝູ່ເນື້ອ
ບໍ່ທັນໄດ້ເຫັນເນື້ອນັ້ນເລີຍ ແຕ່ມາພົບທ່ານເຂົ້າ ຈຶ່ງໄດ້ຢຸດຢືນຢູ່

(ພຣະມະຫາກັດຈາຍະນະເຖຣະທູນວ່າ)

[໙໗໔] ພຣະອົງຜູ້ມີບຸນຫຼາຍ ພຣະອົງສະເດັດມາດີແລ້ວ ທັງບໍ່ໄດ້ສະເດັດມາຮ້າຍ
ຂໍເຊີນພຣະອົງຊົງຕັກນ້ຳຈາກພາຊະນະນີ້ລ້າງພຣະບາດຂອງພຣະອົງເທີ້ນ

[໙໗໕] ນີ້ນ້ຳເຢັນໜ້າດື່ມນຳມາຈາກຮ່ອມພູ
ພຣະຣາດຊະໂອຣົດ ຂໍເຊີນພຣະອົງສະເຫວີຍນ້ຳຈາກພາຊະນະນັ້ນແລ້ວ
ໂຜດສະເດັດເຂົ້າໄປປະທັບນັ່ງເທິງພື້ນທີ່ປູລາດໄວ້ແລ້ວ

(ສຸຊາດກຸມານຕັດວ່າ)

[໙໗໖] ພຣະມະຫາມຸນີ ວາຈາຂອງທ່ານງາມແທ້ນໍ
ໜ້າຟັງ ບໍ່ມີໂທດ ມີແຕ່ປະໂຫຍດ ມ່ວນ
ທ່ານມີປັນຍາກ່າວແຕ່ສິ່ງທີ່ເປັນປະໂຫຍດ

[໙໗໗] ທ່ານຍິນດີອັນໃດຈຶ່ງຢູ່ແຕ່ໃນປ່າ
ພຣະລືສີຜູ້ອົງອາດ ຂ້ານ້ອຍຖາມແລ້ວ ທ່ານໂຜດບອກດ້ວຍເທີ້ນ
ຂ້ານ້ອຍພິຈາລະນາຄຳເວົ້າຂອງທ່ານແລ້ວຈະປະພຶດຢ່າງສະໝ່ຳສະເໝີ
ຕາມທຳນອງແຫ່ງທຳອັນນຳມາເຊິ່ງປະໂຫຍດ

(ພຣະມະຫາກັດຈາຍະນະເຖຣະທູນວ່າ)

[໙໗໘] ພຣະຣາດຊະກຸມານ ອາດຕະມາພາບມັກການບໍ່ບຽດບຽນສັດທັງປວງ
ການງົດເວັ້ນຈາກການລັກຂະໂມຍ ການປະພຶດຜິດປະເວນີ
ແລະການດື່ມນ້ຳເມົາ

[໙໗໙] ຄວາມງົດເວັ້ນ ຄວາມປະພຶດຖືກ
ຄວາມເປັນພະຫູສູດ ຄວາມກະຕັນຍູ
ທຳເຫຼົ່ານີ້ເປັນທຳອັນກຸນລະບຸດເພິ່ງຫວັງໃນປັດຈຸບັນ
ອັນວິນຍູຊົນເພິ່ງສັນເສີນແທ້

[໙໘໐] ພຣະຣາດຊະໂອຣົດ ພຣະອົງຊົງຮູ້ເທີ້ນວ່າ ພຣະອົງໃກ້ສະຫວັນຄົດ
ເຫຼືອອີກບໍ່ເຖິງ ໕ ເດືອນ ໂຜດຟ້າວປົດຕົນສາເທີ້ນ

(ພຣະຣາດຊະກຸມານຕັດຖາມວ່າ)

[໙໙໑] ຂ້ານ້ອຍນັ້ນເພິ່ງໄປຊົນນະບົດໃດ ທຳວຽກງານອັນໃດ
ແລະເຮັດໜ້າທີ່ຂອງບຸຣຸດແນວໃດ ຫຼືໃຊ້ວິຊາອັນໃດ ຈຶ່ງຈະບໍ່ແກ່ບໍ່ຕາຍ

(ພຣະມະຫາກັດຈາຍະນະເຖຣະທູນວ່າ)

[໙໙໘] ພຣະຣາດຊະໂອຣົດ ບໍ່ມີສະຖານທີ່ທີ່ສັດໄປແລ້ວບໍ່ເພິ່ງແກ່ບໍ່ເພິ່ງຕາຍ
ທັງວຽກງານ ວິຊາ ແລະໜ້າທີ່ຂອງບຸຣຸດ
ທີ່ສັດເຮັດແລ້ວຈຶ່ງຈະບໍ່ແກ່ບໍ່ເພິ່ງຕາຍ ກໍບໍ່ມີ

[໙໙໓] ແມ່ນຊົນທັງຫຼາຍທີ່ມີຊັບຫຼາຍ ມີໂພຄະສົມບັດຫຼາຍ
ເຖິງຈະເປັນກະສັດຜູ້ຄອງແວ່ນແຄວ້ນ
ມີຊັບແລະທັນຍາຫານຫຼວງຫຼາຍ
ຈະບໍ່ແກ່ບໍ່ຕາຍ ກໍບໍ່ມີເລີຍ

[໙໙໔] ເຖິງທ່ານຜູ້ເປັນບຸດຂອງຊາວອັນທະກະເວນທຸ ຜູ້ໄດ້ສຶກສາແລ້ວ
ມີຄວາມສາມາດແກ່ກ້າປະຫານຂ້າເສິກໄດ້
ແມ່ນທ່ານເຫຼົ່ານັ້ນເຊິ່ງສະເໝີດ້ວຍສິ່ງທີ່ໝັ້ນຍືນ
ກໍຕ້ອງເຖິງຄວາມສິ້ນອາຍຸສະຫຼາຍໄປ

[໙໙໕] ແມ່ນເຫຼົ່າຊົນທີ່ເປັນກະສັດ ພາມ ແພດ
ສູດ ຈັນທານ ປຸກກຸສະ ແລະຊົນປະເພດອື່ນ
ໂດຍຊາດກຳເນີດເຊິ່ງຈະບໍ່ແກ່ບໍ່ຕາຍບໍ່ມີ

[໙໙໖] ແມ່ນເຫຼົ່າຊົນຜູ້ຈົ່ມມົນພົມຈິນດາມີອົງ ໖
ແລະເຫຼົ່າຊົນທີ່ໃຊ້ວິຊາອື່ນ ໆ ຈະບໍ່ແກ່ບໍ່ຕາຍ ກໍບໍ່ມີ

[໙໙໗] ອັນໜຶ່ງ ແມ່ນລືສີທັງຫຼາຍຜູ້ສະງົບ ສັງລວມຕົນ ພ່ຳເພັງຕະບະ
ກໍຍັງຕ້ອງລະຖິ້ມຮ່າງກາຍໄປຕາມການອັນສົມຄວນ

[໙໙໘] ແມ່ນພຣະອະຣະຫັນທັງຫຼາຍຜູ້ອົບຮົມຕົນແລ້ວ ເຮັດກິດສຳເລັດແລ້ວ
ບໍ່ມີອາສະວະ ສິ້ນບຸນແລະບາບ ກໍຍັງຕ້ອງປະຖິ້ມຮ່າງກາຍນີ້ໄປ

(ພຣະຣາດຊະກຸມານຕັດວ່າ)

[໙໙໙] ພຣະມະຫາມຸນີ ຄາຖາທັງຫຼາຍຂອງທ່ານເປັນສຸພາສິດ ມີປະໂຫຍດ
ຂ້ານ້ອຍໂລ່ງໃຈ ຍ້ອນເນື້ອຄວາມທີ່ເປັນສຸພາສິດ
ແລະຂໍທ່ານໂຜດເປັນບ່ອນເພິ່ງບ່ອນຣະນຶກຂອງຂ້ານ້ອຍດ້ວຍ

[ພຣະມະຫາກັດຈາຍະນະເຖຣະທູນວ່າ)

[໑໐໐໐] ຂໍພຣະອົງຈົ່ງຢ່າຊົງເຖິງອາດຕະມາພາບວ່າເປັນບ່ອນເພິ່ງບ່ອນຣະນຶກເລີຍ
ຂໍຈົ່ງຊົງເຖິງພຣະພຸດທະເຈົ້າຜູ້ເປັນສາກະຍະບຸດ ຜູ້ມີຄວາມພຽນຍິ່ງໃຫຍ່
ຜູ້ເຊິ່ງອາດຕະມາພາບຖືເປັນບ່ອນເພິ່ງບ່ອນຣະນຶກແລ້ວ
ພຣະອົງນັ້ນແລວ່າເປັນບ່ອນເພິ່ງບ່ອນຣະນຶກເທີ້ນ
(ພຣະຣາດຊະກຸມານຕັດຖາມວ່າ)

[໑໐໐໑] ທ່ານຜູ້ມີຣະທຸກ ພຣະສາດສະດາຂອງທ່ານພຣະອົງນັ້ນ
ປະທັບຢູ່ທີ່ຊົນນະບົດໃດ
ເຖິງຂ້ານ້ອຍກໍຈັກໄປເຝົ້າພຣະຊິນນະເຈົ້າຜູ້ຫາບຸກຄົນໃດສະເໝີຄືບໍ່ໄດ້
(ພຣະເຖຣະຖວາຍພຣະພອນວ່າ)

[໑໐໐໒] ພຣະສາດສະດາຜູ້ເປັນບຸຣຸດອາຊາໄນ ຊົງສົມພົບໃນຣາດຊະວົງ
ຂອງພຣະເຈົ້າໂອກກາກະຣາດ ໃນຊົນນະບົດດ້ານທິດຕາເວັນອອກ
ພຣະອົງສະເດັດດັບຂັນທະປະຣິນິບພານສາແລ້ວ

(ພຣະຣາດຊະກຸມານຕັດວ່າ)

[໑໐໐໓] ທ່ານຜູ້ມີຣະທຸກ ຖ້າພຣະບໍຣົມມະສາດສະດາສໍາມາສໍາພຸດທະເຈົ້າຂອງທ່ານ
ຍັງຊົງພະຊົນຢູ່ ເຖິງໄກຫຼາຍພັນໂຍດ
ຂ້ານ້ອຍກໍຈະເພິ່ງໄປເຝົ້າໃກ້ ໆ ໃຫ້ຈົນໄດ້

[໑໐໐໔] ທ່ານຜູ້ມີຣະທຸກ ແຕ່ຍ້ອນພຣະບໍຣົມມະສາດສະດາຂອງທ່ານ
ສະເດັດດັບຂັນທະປະຣິນິບພານສາແລ້ວ
ດັ່ງນັ້ນ ຂ້ານ້ອຍຈຶ່ງຂໍເຖິງພຣະອົງຜູ້ມີຄວາມພຽນຍິ່ງໃຫຍ່
ເຊິ່ງສະເດັດດັບຂັນທະປະຣິນິບພານແລ້ວວ່າເປັນບ່ອນເພິ່ງບ່ອນຣະນຶກ

[໑໐໐໕] ຂ້ານ້ອຍຂໍເຖິງພຣະພຸດທະເຈົ້າ ກັບທັງພຣະທໍາທີ່ຍອດຢ້ຽມ
ແລະພຣະສົງເຊິ່ງເປັນບ່ອນເພິ່ງບ່ອນຣະນຶກຂອງເທວະດາ
ແລະມະນຸດວ່າເປັນບ່ອນເພິ່ງບ່ອນຣະນຶກ

[໑໐໐໖] ຂ້ານ້ອຍຂໍງົດເວັ້ນຈາກການຂ້າສັດໂດຍທັນທີ
ຂໍງົດເວັ້ນຈາກການຖືເອົາສິ່ງຂອງທີ່ເຈົ້າຂອງບໍ່ໄດ້ໃຫ້ໃນໂລກ
ຍິນດີສະເພາະພັນລະຍາຂອງຕົນ ບໍ່ກ່າວຕົວະ ແລະບໍ່ດື່ມນໍ້າເມົາ

(ພຣະເຖຣະຖາມເທບພະບຸດນັ້ນວ່າ)

[໑໐໐໗] ລົດໃຫຍ່ຂອງທ່ານນີ້ແຜ່ຣັດສະໝີໄປໂດຍຮອບກວ້າງ ໑໐໐ ໂຍດ
ດັ່ງດວງອາທິດມີຣັດສະໝີຫຼາຍໂຄຈອນໄປໃນທ້ອງຟ້າ ສ່ອງແສງໄປທົ່ວທຸກທິດ

[໑໐໐໘] ລົດໃຫຍ່ຂອງທ່ານນີ້ບຸດ້ວຍແຜ່ນຄຳໂດຍຮອບ
ງອນລົດນັ້ນວິຈິດດ້ວຍແກ້ວມຸກດາແລະແກ້ວມະນີ
ແຜ່ນຄຳແລະແຜ່ນເງິນມີລວດລາຍສວຍງາມ
ປະດິດດ້ວຍແກ້ວໄພທູນ ບັນຈົງສ້າງໄວ້ຢ່າງດີ ເຮັດໃຫ້ແລເບິ່ງງາມ

[໑໐໐໙] ແລະປາຍງອນລົດນີ້ສ້າງດ້ວຍແກ້ວໄພທູນ
ແອກລົດນີ້ວິຈິດດ້ວຍແກ້ວທັບທິມ
ແມ່ນມ້າເຫຼົ່ານີ້ກໍປະດັບດ້ວຍຄຳແລະເງິນ
ແລ່ນໄດ້ໄວທັນໃຈ ແລເບິ່ງສະງ່າງາມ

[໑໐໑໐] ທ່ານຢືນສະງ່າຢູ່ເທິງລົດຄຳທຽມດ້ວຍມ້າ ໑,໐໐໐ ໂຕເປັນພາຫະນະ
ປຽບດັ່ງທ້າວສັກກະຈອມເທບ ທ່ານຜູ້ມີຍົດ
ອາດຕະມາພາບຂໍຖາມທ່ານຜູ້ຊານສະຫຼາດວ່າ
ຍົດຢ່າງມະໂຫລານນີ້ທ່ານໄດ້ມາແນວໃດ

(ເທບພະບຸດຕອບວ່າ)

[໑໐໑໑] ພຣະຜູ້ເປັນເຈົ້າຜູ້ຈະເລີນ
ຊາດກ່ອນຂ້ານ້ອຍເປັນຣາດຊະໂອຣົດນາມວ່າສຸຊາດ
ແລະພຣະຜູ້ເປັນເຈົ້າໄດ້ອະນຸເຄາະໃຫ້ຂ້ານ້ອຍໄດ້ຕັ້ງຢູ່ໃນຄວາມສັງລວມ

[໑໐໑໒] ອັນໜຶ່ງ ພຣະຜູ້ເປັນເຈົ້າຮູ້ວ່າຂ້ານ້ອຍຈະສິ້ນອາຍຸ
ໄດ້ມອບພຣະບໍຣົມສາຣີຣິກະທາດຂອງພຣະສາດສະດາດ້ວຍກ່າວວ່າ
ສຸຊາດຣາດຊະໂອຣົດ ພຣະອົງຈົ່ງຊົງບູຊາພຣະບໍຣົມສາຣີຣິກະທາດນີ້
ການບູຊານັ້ນຈັກເປັນປະໂຫຍດແກ່ພຣະອົງເອງ

[໑໐໑໓] ຂ້ານ້ອຍໄດ້ຂຶ້ນຂວາຍບູຊາພຣະບໍຣົມສາຣີຣິກະທາດນັ້ນ
ດ້ວຍຂອງຫອມແລະດອກໄມ້ທັງຫຼາຍ
ເມື່ອລະຮ່າງມະນຸດແລ້ວໄດ້ເກີດໃນສວນນັນທະວັນ

[๑๐๑๔] ມີເຫຼົ່ານາງອັບປະສອນຟ້ອນລຳຂັບຮ້ອງຫ້ອມລ້ອມອອນຊອນຢູ່
ໃນສວນນັນທະວັນອັນງາມເລີດ ໜ້າອອນຊອນ
ຂວັກໄຂວ່ໄປດ້ວຍຝູງນົກນານາຊະນິດ

ຈູລະຣະຖະວິມານທີ ๑໓ ຈົບ

## ๑๔. ມະຫາຣະຖະວິມານ
## ວ່າດ້ວຍວິມານທີ່ລົດທິບຄັນໃຫຍ່ເປັນພາຫະນະເກີດຂຶ້ນແກ່ຄົນລ້ຽງງົວ

(ພຣະມະຫາໂມກຄັນລານະເຖຣະຖາມເທບພະບຸດອົງໜຶ່ງວ່າ)

[๑๐๑๕] ທ່ານຂຶ້ນລົດທຽມດ້ວຍມ້າ ๑,๐๐๐ ໂຕເປັນພາຫະນະ
ງາມວິຈິດອະເນກປະການ ຮຸ່ງເຮືອງຄືກັບທ້າວວາສະວະປຸຣິນທະທະ[๑]
ຜູ້ເປັນຈອມເທບເຊິ່ງກຳລັງສະເດັດໄປໃກ້ພື້ນທີ່ອຸທະຍານໂດຍລຳດັບ

[๑๐๑๖] ເປຫານຄົນເຈັບລົດທັງສອງຂ້າງຂອງທ່ານກໍລ້ວນແລ້ວດ້ວຍຄຳ
ປະກອບໄມ້ການເທົ້າແຂນສອງຂ້າງ
ໄມ້ຄານທັງສອງສະນິດດີ ມີລູກກົງຈັດໄວ້ໄດ້ລະບຽບຮຽບຮ້ອຍ
ຄືຊ່າງສິລະປະບັນຈົງຈັດໄວ້ສຳເລັດແລ້ວ
ລົດຂອງທ່ານນີ້ຮຸ່ງເຮືອງດັ່ງດວງຈັນໃນມື້ເພັງ

[๑๐๑๗] ລົດຄັນນີ້ຄຸມດ້ວຍຕາໜ່າງຄຳ ວິຈິດດ້ວຍຣັດຕະນະຕ່າງ ໆ ຫຼວງຫຼາຍ
ມີສຽງກຶກກ້ອງມ່ວນໜ້າເພີດເພີນ ທັງມີຣັດສະໝີຮຸ່ງເຮືອງ
ຮຸ່ງເຮືອງດ້ວຍໝູ່ເທວະດາຖືແສ້ຈາມອນ

[๑๐๑๘] ດຸມລົດເຫຼົ່ານີ້ປະດັບສູນກາງລະຫວ່າງລໍ້ລົດ ເໝືອນເນຣະມິດດ້ວຍໃຈ
ທັງວິຈິດດ້ວຍລວດລາຍເປັນຮ້ອຍ ສະຫວ່າງສະໄຫວດັ່ງສາຍຟ້າແມບ

[๑๐๑๙] ລົດຄັນນີ້ງາມໄປດ້ວຍລວດລາຍວິຈິດອະເນກປະການ
ແລະກົງລໍ້ໃຫຍ່ມີຣັດສະໝີເປັນພັນ
ມີສຽງດັງມ່ວນໜ້າຟັງ ຄ້າຍດົນຕີເຄື່ອງຫ້າທີ່ຂັບບັນເລງແລ້ວ

[๑๐๘๐] ງອນລົດຮ້ອຍໄວ້ດ້ວຍແກ້ວມະນີ ມີສັນຖານກົມດັ່ງດວງຈັນ
ວິຈິດ ບໍລິສຸດ ງົດງາມ ຜຸດຜ່ອງທຸກເມື່ອ
ປະກອບດ້ວຍລາຍຄຳນຽນສະນິດ ງາມລ້ຳຄືລາຍແກ້ວໄພທູນ

[໑໐໘໑] ມ້າເຫຼົ່ານີ້ມັດຮ້ອຍໄວ້ດ້ວຍແກ້ວມະນີ ມີສັນຖານກົມດັ່ງດວງຈັນ
ສູງໃຫຍ່ ວ່ອງໄວ ປຽບຄືມ້າໃຫຍ່ທີ່ຈະເລີນເຕີບໃຫຍ່
ມີລິດຫຼາຍ ຊົງພະລັງ ວ່ອງໄວຫຼາຍ
ຮູ້ໃຈຂອງທ່ານ ແລ່ນໄປໄດ້ໄວດັ່ງໃຈນຶກ

[໑໐໘໘] ດ້ວຍວ່າ ມ້າທັງໝົດນີ້ອົດທົນ ເຫຍາະກ້າວໄປດ້ວຍຕີນທັງ ໔
ຮູ້ໃຈຂອງທ່ານ ແລ່ນໄປໄດ້ໄວດັ່ງໃຈນຶກ ມີກິຣິຍາທ່າທາງນຸ້ມນວນ
ບໍ່ລຳພອງ ແລ່ນພຽງ ເຮັດໃຫ້ຜູ້ຂັບຂີ່ເບີກບານໃຈ ເປັນຍອດມ້າທັງຫຼາຍ

[໑໐໘໓] ບາງເວລາກໍແກວ່ງຂົນຫາງໄປມາ
ບາງເວລາກໍແລ່ນເຫຍາະກ້າວຕີນໄປ ບາງເວລາກໍເຫາະໄປ
ເຮັດເຄື່ອງປະດັບທີ່ເຂົາຕົກແຕ່ງໄວ້ຮຽບຮ້ອຍໃຫ້ກວັດແກວ່ງ
ສຽງເຄື່ອງປະດັບເຫຼົ່ານັ້ນດັງມ່ວນໜ້າຟັງ
ຄ້າຍດົນຕີເຄື່ອງຫ້າທີ່ຂັບບັນເລັງແລ້ວ

[໑໐໘໔] ສຽງລົດ ສຽງເຄື່ອງປະດັບທັງຫຼາຍ ສຽງກີບຕີນມ້າ
ສຽງມ້າສຽດສີກັນ ແລະສຽງເທບຜູ້ບັນເທີງດັງມ່ວນ
ຄ້າຍດົນຕີຂອງຄົນທັນໃນສວນຈິດລະດາ
[໑໐໘໕] ເຫຼົ່າເທບອັບປະສອນຢູ່ເທິງລົດ
ມີດວງຕາອ່ອນໂຍນຄ້າຍດວງຕາລູກເນື້ອຊາຍ
ມີຂົນຕາດົກ ມີໃບໜ້າຍິ້ມແຍ້ມ ເວົ້າຈາອ່ອນຫວານ
ມີຮ່າງກາຍຄຸມດ້ວຍຕາໜ່າງແກ້ວໄພທູນ ມີຜິວນຽນ
ເຊິ່ງຄົນທັນແລະເທວະດາຜູ້ສູງສັກບູຊາທຸກເມື່ອເປັນປະຈຳ

[໑໐໘໖] ເທບອັບປະສອນເຫຼົ່ານັ້ນມີຮູບໂສມເຍົ້າຍວນໜ້າຍິນດີ
ຊົງເຄື່ອງປະດັບສີແດງແລະສີເຫຼືອງ
ມີໜ່ວຍຕາມົນໃຫຍ່ ມີໜ່ວຍຕາງາມໜ້າຮັກຍິ່ງ
ເປັນຜູ້ດີມີສະກຸນ ມີເຮືອນຮ່າງສວຍງາມ
ຍິ້ມແຍ້ມແຈ່ມໃສ ຢືນປະນົມມືເດ່ນຢູ່ເທິງລົດ

[໑໐໘໗] ອັບປະສອນເຫຼົ່ານັ້ນສຸບໃສ່ຄຳກົກແຂນ ຊົງເຄື່ອງປະດັບງົດງາມ
ມີແອວກົມກ້ຽງ ຂາສ້ວຍງາມ ຖັນເຕັ່ງຕຶງ ນິ້ວມືສ້ວຍກົມ
ພັກຜຸດຜ່ອງ ໜ້າຊົມ ຢືນປະນົມມືເດ່ນຢູ່ເທິງລົດ

[໑໐໔໗] ເທບອັບປະສອນລາງພວກມີຊ້ອງຜົມງາມ ລ້ວນເປັນສາວແຣກລຸ້ນ
ມີມວຍຜົມແຊມສະລັບດ້ວຍແກ້ວທັບທິມແລະພວງດອກໄມ້ຈັດແຕ່ງໄວ້ຮຽບຮ້ອຍ
ມີແສງເຫຼື້ອມແພວພາວ
ເທບອັບປະສອນເຫຼົ່ານັ້ນມີກິຣິຍານຸ້ມນວນ
ມີໃຈຊົມຊື່ນຕໍ່ທ່ານ ຢືນປະນົມມືເດ່ນຢູ່ເທິງລົດ

[໑໐໔໘] ລາງພວກມີມາໄລແກ້ວປະດັບເຊີດ
ແລະທັບຊວງດ້ວຍດອກບົວຫຼວງແລະອຸບົນ
ຊົງເຄື່ອງປະດັບ ອົບດ້ວຍແກ່ນຈັນ
ເທບອັບປະສອນເຫຼົ່ານັ້ນມີກິຣິຍານຸ້ມນວນ
ມີໃຈຊົມຊື່ນຕໍ່ທ່ານ ຢືນປະນົມມືເດ່ນຢູ່ເທິງລົດ

[໑໐໔໙] ເທບອັບປະສອນເຫຼົ່ານັ້ນປະດັບພວງມາໄລ
ແລະທັບຊວງດ້ວຍດອກບົວຫຼວງແລະດອກບົວ
ຊົງເຄື່ອງປະດັບ ອົບດ້ວຍແກ່ນຈັນ
ເຖິງພວກນາງກໍມີກິຣິຍານຸ້ມນວນ
ມີໃຈຊົມຊື່ນຕໍ່ທ່ານ ຢືນປະນົມມືເດ່ນຢູ່ເທິງລົດ

[໑໐໕໐] ລາງພວກສະຫວ່າງສະໄຫວໄປທົ່ວທັງສິບທິດດ້ວຍເຄື່ອງປະດັບຄໍ ມື ຕີນ
ແລະຫົວ ຄືພຣະອາທິດໃນສາຣະທະການກຳລັງອຸໄທ

[໑໐໕໑] ດອກໄມ້ແລະເຄື່ອງປະດັບທີ່ແຂນທັງສອງຕ້ອງລົມກໍໄຫວຕິງ
ອອກສຽງກັງວານມ່ວນຈັບໃຈ ອັນວິນຍູຊົນທຸກຄົນຄວນຟັງ

[໑໐໕໒] ທ່ານຜູ້ເປັນຈອມເທບ ສຽງລົດ ຊ້າງ ມ້າ ແລະດົນຕີທັງຫຼາຍ
ເຊິ່ງຢູ່ສອງຂ້າງພື້ນອຸທະຍານເຮັດໃຫ້ທ່ານບັນເທີງໃຈ
ຄືພິນທັງຫຼາຍມີຮາງແລະຄັນຖືທີ່ປະກອບໄວ້ຮຽບຮ້ອຍແລ້ວ

[໑໐໕໓] ເມື່ອພິນມີສຽງມ່ວນຈັບໃຈຈຳນວນຫຼາຍເຫຼົ່ານີ້
ທີ່ເທບອັບປະສອນທັງຫຼາຍບັນເລງຢ່າງຊາບຊຶ້ງຕຶງໃຈຍິ່ງຢູ່
ເຫຼົ່ານາງອັບປະສອນເທບກັນຍາ ຜູ້ລ້ວນຊ່ຽວຊານສິລະປະ
ຕ່າງພາກັນຟ້ອນລຳຢູ່ເທິງດອກບົວຫຼວງທັງຫຼາຍ

[໑໐໕໔] ໃນເວລາທີ່ມີການຂັບຮ້ອງ ການບັນເລງ ແລະການຟ້ອນເຫຼົ່ານີ້

ປະສານກົມກືນເປັນອັນດຽວກັນ
ເທບອັບປະສອນພວກໜຶ່ງຟ້ອນລຳຢູ່ເທິງລົດຂອງທ່ານນີ້
ອີກພວກໜຶ່ງທາງດ້ານນີ້ເປ່ງຣັດສະໝີສະຫວ່າງສະໄຫວທັງສອງດ້ານ

[໑໐໖໖] ທ່ານນັ້ນຜູ້ອັນໝູ່ເທບດຸຣິຍາງປຸກເຮົ້າໃຫ້ເກີດປີຕິໂສມະນັດ
ອັນຫວຍເທບທັງຫຼາຍບູຊາຢູ່
ບັນເທີງໃຈຢູ່ ດັ່ງພຣະອິນຜູ້ຊົງວະຊິຣາວຸດ
ໃນເມື່ອພິນມີສຽງມ່ວນຈັບໃຈຈຳນວນຫຼາຍເຫຼົ່ານີ້
ທີ່ເທບອັບປະສອນທັງຫຼາຍບັນເລງຢ່າງຊາບຊຶ້ງຕຶງໃຈຍິ່ງຢູ່

[໑໐໖໗] ເມື່ອຊາດກ່ອນ ທ່ານເກີດເປັນມະນຸດໄດ້ເຮັດກຳອັນໃດໄວ້
ທ່ານໄດ້ຮັກສາອຸໂປສົດຫຼືວ່າ
ໄດ້ພໍໃຈການປະພຶດທຳແລະການສະມາທານຂໍ້ວັດປະຕິບັດອັນໃດ
[໑໐໖໘] ການທີ່ທ່ານມີອິດທານຸພາບໄພບູນຮຸ່ງເຮືອງຍິ່ງກວ່າໝູ່ເທບນີ້
ບໍ່ແມ່ນຜົນກຳເລັກໜ້ອຍທີ່ທ່ານເຮັດໄວ້ແລ້ວ
ຫຼືອຸໂປສົດທີ່ທ່ານປະພຶດແລ້ວໃນຊາດກ່ອນ

[໑໐໖໙] ນີ້ເປັນຜົນຂອງທານ ຫຼືສີນ ຫຼືການຂາບໄຫວ້ຂອງທ່ານ
ອາດຕະມາຖາມທ່ານແລ້ວ ໂຜດບອກຜົນກຳນັ້ນແກ່ອາດຕະມາເທີ້ນ
[໑໐໘໐] ເທບພະບຸດນັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ
ຈຶ່ງຕອບບັນຫາຜົນກຳໄປຕາມທີ່ພຣະເຖຣະຖາມວ່າ

[໑໐໘໑] ຂ້ານ້ອຍໄດ້ເຫັນພຣະກັດສະປະສຳມາສຳພຸດທະເຈົ້າຜູ້ຊົງຊະນະອິນຊີແລ້ວ
ມີຄວາມພຽນບໍ່ຫຍ່ອນຍານ ຜູ້ສູງສຸດແຫ່ງນະຣະທັງຫຼາຍ ເປັນອັກຄະຣະບຸກຄົນ
ໄຂປະຕູອະມະຕະນິບພານ ເປັນເທບຍິ່ງກວ່າເທບ ເຊິ່ງມີບຸນລັກສະນະນັບຮ້ອຍ

[໑໐໘໒] ເມື່ອໄດ້ເຫັນພຣະອົງຜູ້ຂ້າມໂອຄະໄດ້ແລ້ວເຊັ່ນກັບກຸນຊອນ
ມີພຣະວໍຣະກາຍງົດງາມເຊັ່ນກັບຄຳສິງຄີ ແລະຄຳຊົມພູນຸດ
ກາຍເປັນຂ້ານ້ອຍກໍມີໃຈມົດຈົດຍ້ອນໄດ້ເຫັນພຣະອົງ
ຜູ້ມີທຳທີ່ພຣະອົງຕັດໄວ້ດີແລ້ວເປັນທຸງນັ້ນເອງ

[໑໐໘໓] ຂ້ານ້ອຍນັ້ນມີໃຈບໍ່ຕິດຂ້ອງໃນອັນໃດ ໄດ້ມອບຖວາຍເຂົ້ານ້ຳ
ຈີວອນ ແລະຂອງທີ່ສະອາດ ປະນີດ ມີຣົດຊາດ
ສະເພາະພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ

ໃນບ່ອນຢູ່ຂອງຕົນເຊິ່ງເດຍລະດາດດ້ວຍດອກໄມ້

[໑໐໒໔] ໄດ້ອັງຄາດພຣະພຸດທະເຈົ້າພຣະອົງນັ້ນເຊິ່ງຊົງເປັນຜູ້ສູງສຸດ
ກວ່າເຫຼົ່າມະນຸດ ໃຫ້ອີ່ມໜຳດ້ວຍເຂົ້າ ນໍ້າ ຈີວອນ ຂອງຫຍໍ້າ
ຂອງສົ້ມ ແລະຂອງຊີມ ຈຶ່ງອອນຊອນຢູ່ໃນສະຫວັນອັນເປັນເທວະບຸຣີ

[໑໐໒໕] ໂດຍອຸບາຍນີ້ ຂ້ານ້ອຍໄດ້ຖວາຍທານທີ່ມີຫຼິ້ມໄລອອກແລ້ວນີ້
ອັນມີຄວາມບໍລິສຸດ ໒ ປະການ ລະຮ່າງມະນຸດແລ້ວ
ອອນຊອນຢູ່ໃນເທວະບຸຣີ ສະເໝີຄືກັບພຣະອິນ

[໑໐໒໖] ທ່ານພຣະມຸນີ ບຸກຄົນຜູ້ມຸ້ງຫວັງອາຍຸ ວັນນະ ສຸຂະ ພະລະ
ແລະຮູບທີ່ປະນີດ ມີໃຈບໍ່ຕິດຂ້ອງໃນອັນໃດ ໆ
ເພິ່ງຖວາຍເຂົ້າແລະນໍ້າເຊິ່ງປຸງດີແລ້ວໃຫ້ຫຼາຍແດ່ພຣະສຳມາສຳພຸດທະເຈົ້າ

[໑໐໒໗] ບໍ່ວ່າໃນໂລກນີ້ຫຼືໂລກໜ້າ
ຜູ້ທີ່ປະເສີດກວ່າ ຫຼືສະເໝີດ້ວຍພຣະສຳມາສຳພຸດທະເຈົ້າບໍ່ມີ
ບັນດາຜູ້ຄວນບູຊາທັງຫຼາຍ
ພຣະພຸດທະເຈົ້າເຖິງຄວາມເປັນຜູ້ຄວນບູຊາຢ່າງຍິ່ງ
ຂອງເຫຼົ່າຊົນຜູ້ຕ້ອງການບຸນຫວັງຜົນອັນເຕັມປ່ຽມ

**ມະຫາຣະຖະວິມານທີ ໑໔ ຈົບ**

**ມະຫາຣະຖະວັກທີ ໕ ຈົບ**

## ລວມເລື້ອງວິມານທີ່ມີໃນວັກນີ້ ຄື

໑. ມັນທູກະເທວະປຸດຕະວິມານ
໒. ສັດຕະມານະວະກະວິມານ
໕. ທະວາຣະປາລະວິມານ
໗. ທຸຕິຍະກະຣະນີຍະວິມານ
໙. ທຸຕິຍະສູຈິວິມານ
໑໑. ທຸຕິຍະນາຄະວິມານ
໑໓. ຈູລະຣະຖະວິມານ
໔. ເຣວະຕີວິມານ
໔. ກັກກະຕະກະຣະສະທາຍະກະວິມານ
໖. ປະຖົມກະຣະນີຍະວິມານ
໘. ປະຖົມສູຈິວິມານ
໑໐. ປະຖົມນາຄະວິມານ
໑໒. ຕະຕິຍະນາຄະວິມານ
໑໔. ມະຫາຣະຖະວິມານ

**ພານະວາຣະທີ ໒ ຈົບ**

# ៦. ປາຍາສິກະວັກ

## ໝວດວ່າດ້ວຍເທບພະບຸດຜູ້ເຄີຍເປັນຄົນຮັບໃຊ້ເຈົ້າປາຍາສິ

## ໑. ປະຖົມອະຄາຣິຍະວິມານ

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ສອງຜົວເມຍ

## ຜູ້ເປັນດັ່ງອູ່ເຂົ້າອູ່ນໍ້າຂອງພຣະສົງ ເລື້ອງທີ ໑

(ພຣະມະຫາໂມກຄັນລານະເຖຣະຖາມເທບພະບຸດອົງໜຶ່ງວ່າ)

[໑໐໔໗] ສວນຈິດລະດາເປັນສວນປະເສີດຊັ້ນດີຍິ່ງ
ຂອງຫວຍເທບຊັ້ນໄຕຣທິດ ສ່ອງແສງສະຫວ່າງສະໄຫວສັນໃດ
ວິມານຂອງທ່ານນີ້ກໍມີອຸປະມາສັນນັ້ນ
ສ່ອງແສງສະຫວ່າງສະໄຫວຢູ່ໃນອາກາດ

[໑໐໔໘] ທ່ານໄດ້ບັນລຸເທວະລິດ ມີອານຸພາບຫຼາຍ
ເມື່ອທ່ານເກີດເປັນມະນຸດໄດ້ເຮັດບຸນອັນໃດໄວ້
ຍ້ອນບຸນອັນໃດທ່ານຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

[໑໐໕໐] ເທບພະບຸດນັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ
ຈຶ່ງຕອບບັນຫາຜົນກຳໄປຕາມທີ່ພຣະເຖຣະຖາມວ່າ

[໑໐໕໑] ຂ້ານ້ອຍແລະພັນລະຍາເມື່ອຍັງຄອງເຮືອນຢູ່ໃນມະນຸດສາໂລກ
ໄດ້ເປັນດັ່ງອູ່ເຂົ້າອູ່ນໍ້າ ມີຈິດເຫຼື້ອມໃສ
ໄດ້ຖວາຍເຂົ້າແລະນໍ້າເປັນທານອັນໄພບູນໂດຍເຄົາລົບ
[໑໐໕໘-໑໐໕໙] ຍ້ອນບຸນນັ້ນຂ້ານ້ອຍຈຶ່ງມີຜິວພັນງາມແນວນີ້ ຯລຯ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

**ປະຖົມອະຄາຣິຍະວິມານທີ ໑ ຈົບ**

# ๘. ທຸຕິຍະອະຄາຣິຍະວິມານ

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ສອງຜົວເມຍ

## ຜູ້ເປັນດັ່ງອູ່ເຂົ້າອູ່ນ້ຳຂອງພຣະສົງ ເລື້ອງທີ ๘

(ພຣະມະຫາໂມກຄັນລານະເຖຣະຖາມເທບພະບຸດອົງໜຶ່ງວ່າ)

[๑๐๕๔] ສວນຈິດລະດາເປັນສວນປະເສີດຊັ້ນດີຍັ່ງມ
ຂອງຫວຍເທບຊັ້ນໄຕຣທິດ ສ່ອງແສງສະຫວ່າງສະໄຫວສັນໃດ
ວິມານຂອງທ່ານນີ້ກໍມີອຸປະມາສັນນັ້ນ
ສ່ອງແສງສະຫວ່າງສະໄຫວຢູ່ໃນອາກາດ

[๑๐๕๕] ທ່ານໄດ້ບັນລຸເທວະລິດ ມີອານຸພາບຫຼາຍ
ເມື່ອທ່ານເກີດເປັນມະນຸດໄດ້ເຮັດບຸນອັນໃດໄວ້
ຍ້ອນບຸນອັນໃດທ່ານຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

[๑๐๕๖] ເທບພະບຸດນັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ
ຈຶ່ງຕອບບັນຫາຜົນກຳໄປຕາມທີ່ພຣະເຖຣະຖາມວ່າ

[๑๐๕๗] ຂ້ານ້ອຍແລະພັນລະຍາເມື່ອຍັງຄອງເຮືອນຢູ່ໃນມະນຸດສາໂລກ
ໄດ້ເປັນດັ່ງອູ່ເຂົ້າອູ່ນ້ຳ ມີຈິດເຫຼື້ອມໃສ
ໄດ້ຖວາຍເຂົ້າແລະນ້ຳເປັນທານອັນໄພບູນໂດຍເຄົາລົບ

[๑๐๕๘-๑๐๕๙] ຍ້ອນບຸນນັ້ນຂ້ານ້ອຍຈຶ່ງມີຜິວພັນງາມແນວນີ້ ฯລฯ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

**ທຸຕິຍະອະຄາຣິຍະວິມານທີ ๘ ຈົບ**

## ໓. ຜະລະທາຍະກະວິມານ

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ບຸຣຸດຜູ້ຖວາຍໝາກມ່ວງ ໔ ໜ່ວຍ

(ພຣະມະຫາໂມກຄັນລານະເຖຣະຖາມເທບພະບຸດອົງໜຶ່ງວ່າ)

[໑໐໗໐] ວິມານມີເສົາເຮັດດ້ວຍແກ້ວມະນີນີ້ສູງຫຼາຍ ວັດໂດຍຮອບໄດ້ ໑໔ ໂຍດ
ເປັນຜາສາດ ໗໐໐ ຍອດ ເບິ່ງໂອລານ ມີເສົາປະດິດດ້ວຍແກ້ວໄພທູນ
ມີພື້ນປູລາດດ້ວຍແຜ່ນຄຳສວຍງາມ

[໑໐໗໑] ທ່ານສະຖິດ ດື່ມ ກິນຢູ່ໃນວິມານນັ້ນ
ມີຫວຍເທບພາກັນບັນເລງພິນທິບດັງມ່ວນ
ແລະເທບກັນຍາ ໗໔,໐໐໐ ນາງມີຮູບງາມ
ທ່ອງທ່ຽວໄປມາຢ່າງສຸກສຳຣານໃນພົບຕາວະຕິງສາ ມີສິນບັດຫຼວງຫຼາຍ
ເປັນຜູ້ຊ່ຽວຊານການຟ້ອນລຳຂັບຮ້ອງ ພາກັນມາໃຫ້ຄວາມບັນເທີງໃຈ

[໑໐໗໒] ທ່ານໄດ້ບັນລຸເທວະລິດ ມີອານຸພາບຫຼາຍ
ເມື່ອທ່ານເກີດເປັນມະນຸດໄດ້ເຮັດບຸນອັນໃດໄວ້
ຍ້ອນບຸນອັນໃດທ່ານຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແບວນີ້

[໑໐໗໓] ເທບພະບຸດນັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ
ຈຶ່ງຕອບບັນຫາຜົນກຳໄປຕາມທີ່ພຣະເຖຣະຖາມວ່າ

[໑໐໗໔] ຜູ້ມີໃຈເຫຼື້ອມໃສເມື່ອຈະຖວາຍທານໃນໝູ່ພິກຂຸຜູ້ປະຕິບັດກົງ
ໄດ້ຖວາຍໝາກໄມ້ເປັນປະຈຳ ຈຶ່ງໄດ້ຮັບຜົນບຸນອັນເຕັມປ່ຽມ
ຜູ້ນັ້ນແລໄປສູ່ສະຫວັນຊັ້ນໄຕຣທິດ ແລະສະເຫວີຍຜົນບຸນອັນໄພບູນ

[໑໐໗໕] ທ່ານມະຫາມຸນີ ຂ້ານ້ອຍກໍແບວນັ້ນຄືກັນໄດ້ຖວາຍໝາກມ່ວງ ໔ ໜ່ວຍ

[໑໐໗໖] ຍ້ອນເຫດນັ້ນ ມະນຸດຜູ້ຕ້ອງການຄວາມສຸກ
ປາຖະໜາຄວາມສຸກອັນເປັນທິບ
ຫຼືປາຖະໜາຄວາມເປັນຜູ້ມີສ່ວນດີງາມໃນໝູ່ມະນຸດຢູ່ປະຈຳ
ຄວນຖວາຍໝາກໄມ້ແທ້

[๑๐໕໗-๑๐໕໘] ย้อนบุนนั้นข้าน้อยจึ่งมีผิวพันงามแบบนี้ ฯลฯ
และมีรัดสะหมีกายสะหว่างสะไหวไปทั่วทุกทิดแบบนี้

**ผะละทายะกะวิมานที่ ๓ จิบ**

## ๔. ปะถົມອຸປັດສະຍະທາຍະກະວິມານ
## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ສອງຜົວເມຍຜູ້ບຳລຸງພຣະອະຣະຫັນ ເລື້ອງທີ ๑

(ພຣະມະຫາໂມກຄັນລານະເຖຣະຖາມເທບພະບຸດອົງໜຶ່ງວ່າ)

[๑๐໕໙] ດວງຈັນປາສະຈາກກ້ອນເຜື້ອໝອກ
ສ່ອງແສງສະຫວ່າງຢູ່ໃນນະພາກາດສັນໃດ
ວິມານຂອງທ່ານນີ້ກໍມີອຸປະມາສັນນັ້ນ ສ່ອງແສງສະຫວ່າງສະໄຫວຢູ່ໃນອາກາດ

[๑๐໖๐] ທ່ານໄດ້ບັນລຸເທວະລິດ ມີອານຸພາບຫຼາຍ
ເມື່ອທ່ານເກີດເປັນມະນຸດໄດ້ເຮັດບຸນອັນໃດໄວ້
ຍ້ອນບຸນອັນໃດທ່ານຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແບບນີ້

[๑๐໖๑] ເທບພະບຸດນັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ
ຈຶ່ງຕອບບັນຫາຜົນກຳໄປຕາມທີ່ພຣະເຖຣະຖາມວ່າ

[๑๐໖๒] ຂ້ານ້ອຍແລະພັນຍາເມື່ອຍັງຄອງເຮືອນຢູ່ໃນມະນຸດສາໂລກ
ໄດ້ຖວາຍບ່ອນຢູ່ແດ່ພຣະອະຣະຫັນ ມີຈິດເຫຼື້ອມໃສ
ໄດ້ຖວາຍເຂົ້າແລະນ້ຳເປັນທານອັນໄພບູນໂດຍເຄົາລົບ

[๑๐໖๓-๑๐໖๔] ຍ້ອນບຸນນັ້ນ ຂ້ານ້ອຍຈຶ່ງມີຜິວພັນງາມແບບນີ້ ฯລฯ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແບບນີ້

**ປະຖົມອຸປັດສະຍະທາຍະກະວິມານທີ ๔ ຈົບ**

## ๕. ທຸຕິຍະອຸປັດສະຍະທາຍະກະວິມານ
## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ສອງຜົວເມຍຜູ້ບຳລຸງພຣະອະຣະຫັນ ເລື້ອງທີ ๒

(ພຣະມະຫາໂມກຄັນລານະເຖຣະຖາມເທບພະບຸດອົງໜຶ່ງວ່າ)

[໑໐໗໕-໑໐໗໘] ດວງອາທິດປາສະຈາກກ້ອນເຝື້ອໝອກ
ສ່ອງແສງສະຫວ່າງຢູ່ໃນນະພາກາດສັນໃດ
ວິມານຂອງທ່ານນີ້ກໍມີອຸປະມາສັນນັ້ນ
ສ່ອງແສງສະຫວ່າງສະໄຫວຢູ່ໃນອາກາດ
ຯລຯ

(ອະທິບາຍນອກນີ້ເພິ່ງໃຫ້ພິດສະດານຄືວິມານຂ້າງຕົ້ນ)

[໑໐໗໙-໑໐໘໐] ແລະຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

**ທຸຕິຍະອຸປັດສະຍະທາຍະກະວິມານທີ ໕ ຈົບ**

## ໖. ພິກຂາທາຍະກະວິມານ

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ບຸຣຸດຜູ້ຖວາຍອາຫານແດ່ພິກຂຸ

(ພຣະມະຫາໂມກຄັນລານະເຖຣະຖາມເທບພະບຸດອົງໜຶ່ງວ່າ)

[໑໐໘໑] ວິມານມີເສົາເຮັດດ້ວຍແກ້ວມະນີນີ້ສູງຫຼາຍ ວັດໂດຍຮອບໄດ້ ໑໘ ໂຍດ
ເປັນຜາສາດ ໗໐໐ ຍອດ ເບິ່ງໂອລານ ມີເສົາປະດິດດ້ວຍແກ້ວໄພທູນ
ມີພື້ນປູລາດດ້ວຍແຜ່ນຄຳສວຍງາມ

[໑໐໘໒] ທ່ານໄດ້ບັນລຸເທວະລິດ ມີອານຸພາບຫຼາຍ ຯລຯ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

[໑໐໘໓] ເທບພະບຸດນັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ
ຈຶ່ງຕອບບັນຫາຂອງຜົນກຳໄປຕາມທີ່ພຣະເຖຣະຖາມວ່າ

[໑໐໘໔] ເມື່ອຂ້ານ້ອຍເກີດເປັນມະນຸດຢູ່ໃນໝູ່ມະນຸດ
ໄດ້ເຫັນພິກຂຸຜູ້ຫິວນໍ້າອິດເມື່ອຍມາໃນການນັ້ນ
ຂ້ານ້ອຍໄດ້ປຸງອາຫານແນວໜຶ່ງຖວາຍພ້ອມທັງເຂົ້າສຸກ

[໑໐໘໕-໑໐໘໖] ຍ້ອນບຸນນັ້ນຂ້ານ້ອຍຈຶ່ງມີຜິວພັນງາມແນວນີ້ ຯລຯ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

**ພິກຂາທາຍະກະວິມານທີ ໖ ຈົບ**

# ໗. ຍະວະປາລະກະວິມານ

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ຄົນເຝົ້ານາເຂົ້າໜຽວຜູ້ຖວາຍເຂົ້າໜົມສົດແດ່ພິກຂຸ

(ພຣະມະຫາໂມກຄັນລານະເຖຣະຖາມເທບພະບຸດອົງໜຶ່ງວ່າ)

[໑໐໗໗-໑໐໗໘] ວິມານມີເສົາເຮັດດ້ວຍແກ້ວມະນີນີ້ສູງຫຼາຍ ວັດໂດຍຮອບໄດ້ ໑໒ ໂຍດ
ຯລຯ ແລະມີຣັດສະໝີສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

[໑໐໗໙] ເທບພະບຸດນັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ
ຈຶ່ງຕອບບັນຫາຜົນກຳໄປຕາມທີ່ພຣະເຖຣະຖາມວ່າ

[໑໐໘໐] ເມື່ອຂ້ານ້ອຍເກີດເປັນມະນຸດຢູ່ໃນໝູ່ມະນຸດ
ເປັນຄົນເຝົ້ານາເຂົ້າໜຽວ
ໄດ້ເຫັນພິກຂຸຜູ້ປາສະຈາກກິເລດເໝືອນດັ່ງທຸລີ ມີໃຈຜ່ອງໃສບໍ່ມົວໝອງ

[໑໐໘໑] ເຫຼື້ອມໃສແລ້ວ ຈຶ່ງໄດ້ແບ່ງເຂົ້າໜົມສົດຖວາຍທ່ານດ້ວຍມືທັງສອງຂອງຕົນ
ແລ້ວແລ້ວຈຶ່ງບັນເທີງຢູ່ໃນສວນນັນທະວັນ

[໑໐໘໒-໑໐໘໓] ຍ້ອນບຸນນັ້ນຂ້ານ້ອຍຈຶ່ງມີຜິວພັນງາມແນວນີ້ ຯລຯ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

**ຍະວະປາລະກະວິມານທີ ໗ ຈົບ**

# ໘. ປະຖົມກຸນທະລີວິມານ

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ບຸຣຸດຜູ້ບຳລຸງພຣະສົງ ເລື້ອງທີ ໑

(ພຣະມະຫາໂມກຄັນລານະເຖຣະຖາມເທບພະບຸດອົງໜຶ່ງວ່າ)

[໑໐໘໔] ທ່ານປະດັບຕົກແຕ່ງຮ່າງກາຍ ທັດຊົງດອກໄມ້
ຊົງເຄື່ອງປະດັບສວຍງາມ ໃສ່ຕຸ້ມຫູງາມ
ຕັດຜົມແຖໜວດຮຽບຮ້ອຍ ໃສ່ເຄື່ອງປະດັບຂໍ້ມື
ມີບໍລິວານຍົດ ຮຸ່ງເຮືອງຢູ່ໃນທິບວິມານດັ່ງດວງຈັນ

[໑໐໘໕] ອັນໜຶ່ງ ທວຍເທບພາກັນມາບັນເລງພິນທິບດັ່ງມ່ວນ

ແລະເທບກັນຍາ ໒໘,໐໐໐ ນາງມີຮູບງາມ
ທ່ອງທ່ຽວໄປມາຢ່າງສຸກສຳຣານໃນພິບຕາວະຕິງສາ ມີສິນບັດຫຼວງຫຼາຍ
ເປັນຜູ້ຊ່ຽວຊານການຟ້ອນລຳຂັບຮ້ອງ ພາກັນມາໃຫ້ຄວາມບັນເທີງຢູ່

[໑໐໙໒] ທ່ານໄດ້ບັນລຸເທວະລິດ ມີອານຸພາບຫຼາຍ
ເມື່ອທ່ານເກີດເປັນມະນຸດໄດ້ເຮັດບຸນອັນໃດໄວ້
ຍ້ອນບຸນອັນໃດທ່ານຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

[໑໐໙໓] ເທບພະບຸດນັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ
ຈຶ່ງຕອບບັນຫາຜົນກຳໄປຕາມທີ່ພຣະເຖຣະຖາມວ່າ

[໑໐໙໗] ເມື່ອຂ້ານ້ອຍເກີດເປັນມະນຸດຢູ່ໃນໝູ່ມະນຸດ
ໄດ້ເຫັນສະມະນະທັງຫຼາຍຜູ້ມີສີນ ເຖິງພ້ອມດ້ວຍວິດຊາແລະຈະຣະນະ
ມີບໍລິວານຍົດ ເປັນພະຫູສູດ ບັນລຸທຳທີ່ສິ້ນຕັນຫາ
ມີຈິດເຫຼື້ອມໃສໄດ້ຖວາຍເຂົ້າແລະນ້ຳເປັນທານອັນໄພບູນໂດຍເຄົາລົບ

[໑໐໙໙-໑໑໐໐] ຍ້ອນບຸນນັ້ນຂ້ານ້ອຍຈຶ່ງມີຜິວພັນງາມແນວນີ້ ຯລຯ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

**ປະຖົມກຸນທະລີວິມານທີ ໗ ຈົບ**

## ໙. ທຸຕິຍະກຸນທະລີວິມານ

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ບຸຣຸດຜູ້ບຳລຸງພຣະສົງ ເລື້ອງທີ ໘

(ພຣະມະຫາໂມກຄັນລານະເຖຣະຖາມເທບພະບຸດອົງໜຶ່ງວ່າ)

[໑໑໐໑] ທ່ານປະດັບຕົກແຕ່ງຮ່າງກາຍ ທັດຊົງດອກໄມ້
ຊົງເຄື່ອງປະດັບສວຍງາມ
ໃສ່ຕຸ້ມຫູງົດງາມ ຕັດຜົມແຖໜວດຮຽບຮ້ອຍ ໃສ່ເຄື່ອງປະດັບຂໍ້ມື
ມີບໍລິວານຍົດ ຮຸ່ງເຮືອງຢູ່ໃນທິບວິມານດັ່ງດວງຈັນ

໑໑໐໘] ອັນໜຶ່ງ ທວຍເທບພາກັນມາບັນເລງພິນທິບດັ່ງມ່ວນ
ແລະເທບກັນຍາ ໒໘,໐໐໐ ນາງມີຮູບງາມ

ທ່ອງທ່ຽວໄປມາຢ່າງສຸກສຳຣານໃນພິບຕາວະຕິງສາ ມີສົມບັດຫຼວງຫຼາຍ
ເປັນຜູ້ຊ່ຽວຊານການຟ້ອນລຳຂັບຮ້ອງ ພາກັນມາໃຫ້ຄວາມບັນເທີງຢູ່

[໑໑໐໖] ທ່ານໄດ້ບັນລຸເທວະລິດ ມີອານຸພາບຫຼາຍ
ເມື່ອທ່ານເກີດເປັນມະນຸດໄດ້ເຮັດບຸນອັນໃດໄວ້
ຍ້ອນບຸນອັນໃດທ່ານຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

[໑໑໐໔] ເທບພະບຸດນັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ
ຈຶ່ງຕອບບັນຫາຜົນກຳໄປຕາມທີ່ພຣະເຖຣະຖາມວ່າ

[໑໑໐໕] ເມື່ອຂ້ານ້ອຍເກີດເປັນມະນຸດຢູ່ໃນໝູ່ມະນຸດ
ໄດ້ເຫັນສະມະນະທັງຫຼາຍຜູ້ດີງາມ ເຖິງພ້ອມດ້ວຍວິດຊາແລະຈະຣະນະ
ມີບໍລິວານຍົດ ເປັນພະຫູສູດ ມີສິນ ມີອິນຊີຜ່ອງໃສ
ຈຶ່ງມີຈິດເຫຼື້ອມໃສ ໄດ້ຖວາຍເຂົ້າແລະນໍ້າ
ເປັນທານອັນໄພບູນໂດຍເຄົາລົບ

[໑໑໐໖-໑໑໐໗] ຍ້ອນບຸນນັ້ນຂ້ານ້ອຍຈຶ່ງມີຜິວພັນງາມແນວນີ້ ຯລຯ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

**ທຸຕິຍະກຸນທະລິວິມານທີ ໙ ຈົບ**

## ໑໐. ປາຍາສິວິມານ

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ບຸຣຸດຜູ້ເປັນຄົນຮັບໃຊ້ເຈົ້າປາຍາສິ

(ພຣະມະຫາໂມກຄັນລານະເຖຣະຖາມເທບພະບຸດອົງໜຶ່ງວ່າ)

[໑໑໐໘] ວິມານຂອງທ່ານນີ້ປຽບເໝືອນສຸທຳມະສະພາຂອງທ້າວສັກກະເທວະຣາດ
ອັນເປັນສະພາທີ່ໝູ່ເທບນັ່ງປະຊຸມກັນຢ່າງພ້ອມພຽງ
ສ່ອງແສງສະຫວ່າງສະໄຫວຢູ່ໃນອາກາດ

[໑໑໐໙] ທ່ານໄດ້ບັນລຸເທວະລິດ ມີອານຸພາບຫຼາຍ
ເມື່ອທ່ານເກີດເປັນມະນຸດໄດ້ເຮັດບຸນອັນໃດໄວ້
ຍ້ອນບຸນອັນໃດທ່ານຈຶ່ງມີອານຸພາບຮຸ່ງເຮືອງ

ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

[໑໑໑໐] ເທບພະບຸດນັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ ຈຶ່ງຕອບບັນຫາຜົນກຳໄປຕາມທີ່ພຣະເຖຣະຖາມວ່າ

[໑໑໑໑] ເມື່ອຂ້ານ້ອຍເກີດເປັນມະນຸດຢູ່ໃນໝູ່ມະນຸດ ເປັນຊາຍໜຸ່ມຮັບໃຊ້ຂອງເຈົ້າປາຍາສີ ໄດ້ຊັບມາແລ້ວກໍທຳການແຈກຈ່າຍ ອັນໜຶ່ງ ທ່ານຜູ້ມີສີນທັງຫຼາຍເປັນທີ່ຮັກຂອງຂ້ານ້ອຍ ຂ້ານ້ອຍມີຈິດເຫຼື້ອມໃສ ໄດ້ຖວາຍເຂົ້າແລະນ້ຳເປັນທານອັນໄພບູນໂດຍເຄົາລົບ

[໑໑໑໒-໑໑໑໓] ຍ້ອນບຸນນັ້ນຂ້ານ້ອຍຈຶ່ງມີຜິວພັນງາມແນວນີ້ ໆລໆ ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

**ປາຍາສິວິມານທີ ໑໐ ຈົບ**

**ປາຍາສິກະວັກທີ ໗ ຈົບ**

## ລວມເລື້ອງວິມານທີ່ມີໃນວັກນີ້ ຄື

| | |
|---|---|
| ໑. ປະຖົມອະຄາຣິຍະວິມານ | ໒. ທຸຕິຍະອະຄາຣິຍະວິມານ |
| ໓. ຜະລະທາຍະກະວິມານ | ໔. ປະຖົມອຸປັດສະຍະທາຍະກະວິມານ |
| ໕. ທຸຕິຍະອຸປັດສະຍະທາຍະກະວິມານ | ໖. ພິກຂາທາຍະກະວິມານ |
| ໗. ຍະວະປາລະກະວິມານ | ໘. ປະຖົມກຸນທະລີວິມານ |
| ໙. ທຸຕິຍະກຸນທະລີວິມານ | ໑໐. ປາຍາສິວິມານ |

**ຈະກ່າວປຸຣິສະວິມານວັກທີ ໘ ດັ່ງນີ້**

# ໗. ສຸນິກຂິດຕະວັກ

## ໝວດວ່າດ້ວຍເທບພະບຸດຜູ້ຈັດດອກໄມ້ໃຫ້ເປັນລະບຽບ

## ໑. ຈິດຕະລະຕາວິມານ

### ວ່າດ້ວຍວິມານທີ່ຮຸ່ງເຮືອງຄືສວນຈິດຣະດາ

(ພຣະມະຫາໂມກຄັນລານະເຖຣະຖາມເທບພະບຸດອົງໜຶ່ງວ່າ)

[໑໑໑໔] ສວນຈິດລະດາເປັນສວນປະເສີດຊັ້ນດີຍິ່ງ
ຂອງຫວຍເທບຊັ້ນຕາວະຕິງສາ ສ່ອງແສງສະຫວ່າງສະໄຫວສັນໃດ
ວິມານຂອງທ່ານນີ້ກໍມີອຸປະມາສັນນັ້ນ ສ່ອງແສງສະຫວ່າງສະໄຫວຢູ່ໃນອາກາດ

[໑໑໑໕] ທ່ານໄດ້ບັນລຸເທວະລິດ ມີອານຸພາບຫຼາຍ
ເມື່ອທ່ານເກີດເປັນມະນຸດໄດ້ເຮັດບຸນອັນໃດໄວ້
ຍ້ອນບຸນອັນໃດທ່ານຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

[໑໑໑໖] ເທບພະບຸດນັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ
ຈຶ່ງຕອບບັນຫາຂອງຜົນກຳໄປຕາມທີ່ພຣະເຖຣະຖາມວ່າ

[໑໑໑໗] ເມື່ອຂ້ານ້ອຍເກີດເປັນມະນຸດຢູ່ໃນໝູ່ມະນຸດ
ເປັນຄົນທຸກຍາກ ບໍ່ມີບ່ອນເພິ່ງ ຍາກໄຮ້ ເປັນກຳມະກອນ
ລ້ຽງດູມານດາບິດາຜູ້ແກ່ເຖົ້າ
ອັນໜຶ່ງ ທ່ານຜູ້ມີສິນທັງຫຼາຍເປັນທີ່ຮັກຂອງຂ້ານ້ອຍ ຂ້ານ້ອຍມີຈິດເຫຼື້ອມໃສ
ໄດ້ຖວາຍເຂົ້າແລະນ້ຳເປັນທານອັນໄພບູນໂດຍເຄົາລົບ

[໑໑໑໘-໑໑໑໙] ຍ້ອນບຸນນັ້ນຂ້ານ້ອຍຈຶ່ງມີຜິວພັນງາມແນວນີ້ ຯລຯ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

**ຈິດຕະລະຕາວິມານທີ ໑ ຈົບ**

# ໘. ບັນທະນະວິມານ

## ວ່າດ້ວຍວິມານທີ່ຮຸ່ງເຮືອງຄືສວນນັນທະວັນ

(ພຣະມະຫາໂມກຄັນລານະເຖຣະຖາມເທບພະບຸດອົງໜຶ່ງວ່າ)

[໑໑໘໐] ສວນນັນທະວັນເປັນສວນປະເສີດຊັ້ນດີຢ້ຽມ
ຂອງຫວຍເທບຊັ້ນຕາວະຕິງສາ ສ່ອງແສງສະຫວ່າງສະໄຫວສັນໃດ
ວິມານຂອງທ່ານນີ້ກໍມີອຸປະມາສັນນັ້ນ ສ່ອງແສງສະຫວ່າງສະໄຫວຢູ່ໃນອາກາດ

[໑໑໘໑] ທ່ານໄດ້ບັນລຸເທວະລິດ ມີອານຸພາບຫຼາຍ
ເມື່ອທ່ານເກີດເປັນມະນຸດໄດ້ເຮັດບຸນອັນໃດໄວ້
ຍ້ອນບຸນອັນໃດທ່ານຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

[໑໑໘໘] ເທບພະບຸດນັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ
ຈຶ່ງຕອບບັນຫາຜົນກຳໄປຕາມທີ່ພຣະເຖຣະຖາມວ່າ

[໑໑໘໓] ເມື່ອຂ້ານ້ອຍເກີດເປັນມະນຸດຢູ່ໃນໝູ່ມະນຸດ
ເປັນຄົນທຸກຍາກຈົນ ບໍ່ມີບ່ອນເພິ່ງ ຍາກໄຮ້ ເປັນກຳມະກອນ
ລ້ຽງດູມານດາບິດາຜູ້ແກ່ເຖົ້າ

ອັນໜຶ່ງ ທ່ານຜູ້ມີສີນທັງຫຼາຍເປັນທີ່ຮັກຂອງຂ້ານ້ອຍ ຂ້ານ້ອຍມີຈິດເຫຼື້ອມໃສ ໄດ້ຖວາຍເຂົ້າແລະນ້ຳເປັນທານອັນໄພບູນໂດຍເຄົາລົບ

[໑໑໘໔-໑໑໘໕] ຍ້ອນບຸນນັ້ນຂ້ານ້ອຍຈຶ່ງມີຜິວພັນງາມແນວນີ້ ໗ລ໗
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

**ບັນທະນະວິມານທີ ໘ ຈົບ**

# ໓. ມະນິຖູນະວິມານ

## ວ່າດ້ວຍວິມານແກ້ວມະນີທີ່ເກີດຂຶ້ນແກ່ບຸຣຸດຜູ້ປຸກຕົ້ນໄມ້ໃຫ້ຮົ່ມ

(ພຣະມະຫາໂມກຄັນລານະເຖຣະຖາມເທບພະບຸດອົງໜຶ່ງວ່າ)

[໑໑໘໖] ວິມານມີເສົາເຮັດດ້ວຍແກ້ວມະນີນີ້ສູງຫຼາຍ ວັດໂດຍຮອບໄດ້ ໑໒ ໂຍດ
ເປັນຜາສາດ ໗໐໐ ຍອດ ເບິ່ງໂອລານ ມີເສົາປະດິດດ້ວຍແກ້ວໄພທູນ
ມີພື້ນປູລາດດ້ວຍແຜ່ນຄໍາສວຍງາມ

[໑໑໘໗] ທ່ານສະຖິດ ດື່ມ ກິນຢູ່ໃນວິມານນັ້ນ
ມີຫວຍເທບພາກັນມາບັນເລງພິນທິບດັງມ່ວນ
ໃນວິມານຂອງທ່ານນີ້ມີປັນຈະກາມະຄຸນອັນເປັນທິບອົດ
ແລະເຫຼົ່າເທບນາຣີຜູ້ປະດັບດ້ວຍອາພອນຄໍາຟ້ອນລໍາຢູ່

[໑໑໘໘-໑໑໘໙] ຍ້ອນບຸນອັນໃດທ່ານຈຶ່ງມີຜິວພັນງາມແນວນີ້ ฯລฯ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

[໑໑໖໐] ເທບພະບຸດນັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ
ຈຶ່ງຕອບບັນຫາຜົນກໍາໄປຕາມທີ່ພຣະເຖຣະຖາມວ່າ

[໑໑໖໑] ເມື່ອຂ້ານ້ອຍເກີດເປັນມະນຸດຢູ່ໃນໝູ່ມະນຸດ
ໄດ້ສ້າງທີ່ຈົງກົມໄວ້ໃກ້ທົນທາງໃນປ່າ ແລະປຸກຕົ້ນໄມ້ໃຫ້ຮົ່ມ
ອັນໜຶ່ງ ທ່ານຜູ້ມີສິນທັງຫຼາຍເປັນທີ່ຮັກຂອງຂ້ານ້ອຍ ຂ້ານ້ອຍມີຈິດເຫຼື້ອມໃສ
ໄດ້ຖວາຍເຂົ້າແລະນໍ້າເປັນທານອັນໄພບູນໂດຍເຄົາລົບ

[໑໑໖໒-໑໑໖໖] ຍ້ອນບຸນນັ້ນຂ້ານ້ອຍຈຶ່ງມີຜິວພັນງາມແນວນີ້ ฯລฯ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

**ມະນີຖູນະວິມານທີ ໖ ຈົບ**

## ໔. ສຸວັນນະວິມານ

## ວ່າດ້ວຍວິມານຄໍາທີ່ເກີດຂຶ້ນແກ່ບຸຣຸດ

## ຜູ້ສ້າງວິຫານຖວາຍພຣະພຸດທະເຈົ້າ

(ພຣະມະຫາໂມກຄັນລານະເຖຣະຖາມເທບພະບຸດອົງໜຶ່ງວ່າ)

[໑໑໖໔] ວິມານທີ່ພູຄໍາຂອງທ່ານ ມີຣັດສະໝີສະຫວ່າງສະໄຫວໄປທົ່ວທຸກສ່ວນ
ປົກຄຸມດ້ວຍຕາໜ່າງຄໍາ ມັດຂຶງຕາໜ່າງກະດິງໄວ້

[໑໑໖໕] ເສົາວິມານທຸກຕົ້ນແປດຫຼ່ຽມ ສ້າງໄວ້ຢ່າງສວຍງາມ
ລ້ວນປະດິດດ້ວຍແກ້ວໄພທູນ ແຕ່ລະຫຼ່ຽມປະດັບຣັດຕະນະ ໆ ປະການ
[໑໑໖໖] ມີພື້ນໜ້າອອນຊອນໃຈ ວິຈິດດ້ວຍແກ້ວໄພທູນ ຄຳ
ແກ້ວຜຼຶກ ເງິນ ແກ້ວລາຍ ແກ້ວມຸກດາ ແລະທັບທິມ
[໑໑໖໗] ທີ່ວິມານນັ້ນບໍ່ມີທຸລີຟຸ້ງຂຶ້ນ
ມີໝູ່ຈັນທັນສີເຫຼືອງສ້າງໄວ້ຮອງຮັບຊໍ່ຟ້າ
[໑໑໖໗] ຂັ້ນໄດ ໔ ຂັ້ນໄດສ້າງໄວ້ ໔ ທິດ
ວິມານນັ້ນມີຫ້ອງສຳເລັດດ້ວຍຣັດຕະນະຕ່າງ ໆ ຮຸ່ງເຮືອງດັ່ງພຣະອາທິດ

[໑໑໖໙] ທີ່ວິມານນັ້ນ ມີໄພທີຢູ່ທັງ ໔ ທິດ ຈັດສ້າງໄດ້ສັດສ່ວນ
ສ່ອງແສງຮຸ່ງເຮືອງສະຫວ່າງສະໄຫວໂດຍຮອບທັງ ໔ ທິດ

[໑໑໘໐] ໃນວິມານອັນປະເສີດນັ້ນ ທ່ານເປັນເທບພະບຸດມີຣັດສະໝີຮຸ່ງເຮືອງຫຼາຍ
ມີຜິວພັນຮຸ່ງເຮືອງຢ່າງຍິ່ງ ດັ່ງພຣະອາທິດກຳລັງອຸໄທ

[໑໑໘໑] ນີ້ເປັນຜົນຂອງທານ ຫຼືສິນ ຫຼືການຂາບໄຫວ້ຂອງທ່ານ
ອາດຕະມາຖາມທ່ານແລ້ວ ໂຜດບອກຜົນກຳນັ້ນແກ່ອາດຕະມາເທີ້ນ

[໑໑໘໒] ເທບພະບຸດນັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ
ຈຶ່ງຕອບບັນຫາຜົນກຳໄປຕາມທີ່ພຣະເຖຣະຖາມວ່າ

[໑໑໘໓] ຂ້ານ້ອຍເຫຼື້ອມໃສແລ້ວໃຫ້ສ້າງວິຫານໃກ້ເມືອງອັນທະກະວິນທະ
ຖວາຍພຣະບໍຣົມມະສາດສະດາສຳມາສຳພຸດທະເຈົ້າ
ຜູ້ຊົງເປັນເຜົ່າພັນພຣະອາທິດດ້ວຍມືຂອງຕົນ

[໑໑໘໔] ຂ້ານ້ອຍມີຈິດຜ່ອງໃສ ໄດ້ຖວາຍຂອງຫອມ ດອກໄມ້ ປັດໄຈ ເຄື່ອງລູບທາ
ແລະວິຫານແດ່ພຣະສາດສະດາທີ່ເມືອງອັນທະກະວິນທະນັ້ນ
ຍ້ອນບຸນກຳອັນເປັນເຫດນັ້ນ ຂ້ານ້ອຍໄດ້ຜົນບຸນນີ້
ຈຶ່ງມີສິດທີໃນສວນນັນທະວັນ

[໑໑໘໕] ຂ້ານ້ອຍມີໝູ່ເທບອັບປະສອນຟ້ອນລຳຂັບຮ້ອງຫ້ອມລ້ອມ
ອອນຊອນຢູ່ໃນສວນນັນທະວັນອັນໜ້າອອນຊອນ
ມີໝູ່ນົກນານາຊະນິດຫຼວງຫຼາຍ

**ສຸວັນນະວິມານທີ ໔ ຈົບ**

# ໕. ອຳພະວິມານ

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ບຸຣຸດຜູ້ຮັບຈ້າງຫົດນ້ຳຕົ້ນໝາກມ່ວງ

## ໄດ້ຖວາຍນ້ຳອາບແດ່ພຣະສາຣີບຸດ

(ພຣະມະຫາໂມກຄັນລານະເຖຣະຖາມເທບພະບຸດອົງໜຶ່ງວ່າ)

[໑໑໔໖] ວິມານມີເສົາເຮັດດ້ວຍແກ້ວມະນີນີ້ສູງຫຼາຍ ວັດໂດຍຮອບໄດ້ ໑໔ ໂຍດ
ເປັນຜາສາດ ๗໐໐ ຍອດ ເບິ່ງໂອລານ ມີເສົາປະດິດດ້ວຍແກ້ວໄພທູນ
ມີພື້ນປູລາດດ້ວຍແຜ່ນຄຳສວຍງາມ

[໑໑໔๗] ທ່ານສະຖິດ ດື່ມ ກິນຢູ່ໃນວິມານນັ້ນ
ມີຫວຍເທບພາກັນມາບັນເລງພິນທິບດັງມ່ວນ
ໃນວິມານຂອງທ່ານນີ້ມີປັນຈະກາມະຄຸນອັນເປັນທິບຣົດ
ແລະເຫຼົ່າເທບນາຣີປະດັບດ້ວຍອາພອນຄຳຟ້ອນລຳຢູ່

[໑໑໔໘-໑໑໔໙] ຍ້ອນບຸນອັນໃດທ່ານຈຶ່ງມີຜິວພັນງາມແນວນີ້ ໗໑໗
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

[໑໑໕໐] ເທບພະບຸດນັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ
ຈຶ່ງຕອບບັນຫາຜົນກຳໄປຕາມທີ່ພຣະເຖຣະຖາມວ່າ

[໑໑໕໑] ເມື່ອພຣະອາທິດກຳລັງແຜດແສງໃນເດືອນທ້າຍລະດູຮ້ອນ
ຂ້ານ້ອຍເປັນຄົນຮັບຈ້າງຫົດນ້ຳສວນໝາກມ່ວງຂອງຄົນເຫຼົ່າອື່ນ

[໑໑໕໒] ຂະນະນັ້ນ ພຣະສາຣີບຸດເຊິ່ງອິດເມື່ອຍກາຍ
ແຕ່ໃຈບໍ່ໄດ້ອິດເມື່ອຍ ໄດ້ຍ່າງມາທາງສວນໝາກມ່ວງນັ້ນ
[໑໑໕໓] ຂ້ານ້ອຍກຳລັງຫົດນ້ຳຕົ້ນໝາກມ່ວງເຫັນທ່ານກຳລັງຍ່າງມາ
ຈຶ່ງໄດ້ກ່າວວ່າ ຂໍໂອກາດເທີ້ນຂ້ານ້ອຍ ຂ້ານ້ອຍຂໍນິມົນໃຫ້ທ່ານສົງນ້ຳ
ຂໍ້ນັ້ນຈະນຳຄວາມສຸກມາໃຫ້ຂ້ານ້ອຍ

[໑໑໕໔] ພຣະຜູ້ເປັນເຈົ້າສາຣີບຸດວາງບາດຈີວອນໄວ້ ເຫຼືອຜ້າສະບົງຜືນດຽວ
ນັ່ງທີ່ຮົ່ມເງົາເຫງົ້າຕົ້ນໄມ້ ເພື່ອອະນຸເຄາະຂ້ານ້ອຍນັ້ນ

[໑໑໕໕] ຂ້ານ້ອຍມີຈິດເຫຼື້ອມໃສ ນຳນ້ຳໃສມາຖວາຍໃຫ້ທ່ານ
ເຊິ່ງມີຜ້າສະບົງຜືນດຽວອາບທີ່ຮົ່ມເງົາເຫງົ້າຕົ້ນໄມ້

[໑໑໕໖] ຕົ້ນໝາກມ່ວງເຮົາກໍຫົດນ້ຳແລ້ວ ສະມະນະເຮົາກໍໃຫ້ສົງນ້ຳແລ້ວ
ແລະບຸນບໍ່ແມ່ນໜ້ອຍເຮົາກໍຂົນຂວາຍແລ້ວ ຍ້ອນເຫດດັ່ງນີ້
ຄົນຜູ້ນັ້ນຈຶ່ງມີປີຕິຊາບຊ່ານໄປທົ່ວກາຍຂອງຕົນ

[໑໑໕໗] ຊາດນັ້ນ ຂ້ານ້ອຍໄດ້ເຮັດກຳມີປະມານທໍ່ນີ້ນັ້ນເອງ
ລະຮ່າງມະນຸດແລ້ວ ມາເກີດຍັງສວນນັນທະວັນ

[໑໑໕໘] ຂ້ານ້ອຍມີໝູ່ເທບອັບປະສອນຟ້ອນລຳຂັບຮ້ອງຫ້ອມລ້ອມ
ອອນຊອນຢູ່ໃນສວນນັນທະວັນອັນໜ້າອອນຊອນ
ມີໝູ່ນົກນານາຊະນິດຫຼວງຫຼາຍ

**ອຳພະວິມານທີ ໕ ຈົບ**

# ໖. ໂຄປາລະວິມານ

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ຄົນລ້ຽງງົວຜູ້ຖວາຍເຂົ້າໜົມແດ່ພິກຂຸ

(ພຣະມະຫາໂມກຄັນລານະເຖຣະຖາມເທບພະບຸດອົງໜຶ່ງວ່າ)

[໑໑໕໙] ພິກຂຸອົງໜຶ່ງເຫັນເທວະດາແລ້ວ ສອບຖາມວ່າ
ທ່ານໃສ່ເຄື່ອງປະດັບຂໍ້ມື ມີບໍລິວານຍົດ
ຮຸ່ງເຮືອງຢູ່ໃນວິມານສູງເຊິ່ງຕັ້ງຢູ່ຊົ່ວກາລະນານ
ຄືຈັນທະເທບພະບຸດຮຸ່ງເຮືອງຢູ່ໃນທິບພະວິມານ

[໑໑໖໐] ທ່ານປະດັບແລ້ວ ທັດຊົງດອກໄມ້ ຊົງເຄື່ອງປະດັບສວຍງາມ
ໃສ່ຕຸ້ມຫູງົດງາມ ຕັດຜົມແຖໜວດຮຽບຮ້ອຍ
ໃສ່ເຄື່ອງປະດັບຂໍ້ມື ມີບໍລິວານຍົດ
ຮຸ່ງເຮືອງຢູ່ໃນທິບພະວິມານດັ່ງດວງຈັນ

[໑໑໖໑] ອັນໜຶ່ງ ທວຍເທບພາກັນມາບັນເລງພິນທິບດັງມ່ວນ
ແລະເທບກັນຍາ ໖໔,໐໐໐ ນາງມີຮູບງາມ
ທ່ອງທ່ຽວໄປມາຢ່າງສຸກສຳຣານໃນພົບຕາວະຕິງສາ

ມີສົມບັດຫຼວງຫຼາຍ ເປັນຜູ້ຊ່ຽວຊານການ
ພາກັນມາຟ້ອນລຳຂັບຮ້ອງ ໃຫ້ຄວາມບັນເທີງໃຈຢູ່

[໑໑໖໘] ທ່ານໄດ້ບັນລຸເທວະລິດ ມີອານຸພາບຫຼາຍ
ເມື່ອທ່ານເກີດເປັນມະນຸດໄດ້ເຮັດບຸນອັນໃດໄວ້
ຍ້ອນບຸນອັນໃດທ່ານຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

[໑໑໖໙] ເທບພະບຸດນັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ
ຈຶ່ງຕອບບັນຫາຜົນກຳໄປຕາມທີ່ພຣະເຖຣະຖາມວ່າ

[໑໑໗໐] ເມື່ອຂ້ານ້ອຍເກີດເປັນມະນຸດຢູ່ໃນໝູ່ມະນຸດ
ຮັບຈ້າງລ້ຽງງົວນົມທັງຫຼາຍຂອງຄົນເຫຼົ່າອື່ນ
ຕໍ່ມາມີສະມະນະມາຫາຂ້ານ້ອຍ
ແລະຝູງງົວໄດ້ພາກັນໄປເພື່ອຈະກິນຖົ່ວຣາຊະມາດ

[໑໑໗໑] ອັນໜຶ່ງ ມື້ນີ້ຂ້ານ້ອຍຕ້ອງເຮັດກິດສອງຢ່າງຄວບຄູ່ກັນໄປ
ທ່ານຂ້ານ້ອຍ ຄັ້ງນັ້ນ ຂ້ານ້ອຍໄດ້ຄິດແນວນັ້ນແລ
ແຕ່ນັ້ນຈຶ່ງກັບໄດ້ຄວາມເຂົ້າໃຈຢ່າງເລິກເຊິ່ງ
ຈຶ່ງວາງຫໍ່ເຂົ້າໜົມຖວາຍໃນມືພ້ອມກັບຂາບຮຽນວ່າ
ຂ້ານ້ອຍຂໍຖວາຍ ຂ້ານ້ອຍ

[໑໑໗໒] ຂ້ານ້ອຍນັ້ນຮີບຟ້າວໄປສູ່ໄຮ່ຖົ່ວຣາຊະມາດ
ກ່ອນທີ່ໄຮ່ຖົ່ວຣາຊະມາດເຊິ່ງເປັນຊັບສົມບັດຂອງເຈົ້າຂອງໄຮ່ຈະຖືກຝູງງົວທຳລາຍ
ໃນບ່ອນນັ້ນ ງູເຫົ່າມີພິດຮ້າຍໄດ້ກັດຕີນຂ້ານ້ອຍຜູ້ກຳລັງຮີບຮ້ອນ

[໑໑໗໓] ຂ້ານ້ອຍນັ້ນຖືກຄວາມທຸກບຽດບຽນບີບຄັ້ນ
ແລະພິກຂຸໄດ້ແກ້ຫໍ່ເຂົ້າໜົມນັ້ນອອກ
ແລ້ວສັນເຂົ້າໜົມເພື່ອອະນຸເຄາະຂ້ານ້ອຍ
ຂ້ານ້ອຍຕາຍເຄື່ອນຈາກອັດຕະພາບນັ້ນແລ້ວຕາຍໄປເກີດເປັນເທວະດາ

[໑໑໗໔] ຂ້ານ້ອຍເຮັດກຸສົນກຳນັ້ນໄວ້ທີ່ນີ້
ຕົນເອງຈຶ່ງໄດ້ສະເຫວີຍຜົນກຳທີ່ນຳຄວາມສຸກມາໃຫ້
ຍ້ອນພຣະຜູ້ເປັນເຈົ້າອະນຸເຄາະໄວ້ຫຼາຍແລ້ວ

ຂ້ານ້ອຍຂໍຂາບໄຫວ້ພຣະຜູ້ເປັນເຈົ້າດ້ວຍຄວາມກະຕັນຍູ

[໑໑໒໙] ໃນມະນຸດສາໂລກພ້ອມທັງເທວະໂລກແລະມານໂລກ
ບໍ່ມີມຸນີທ່ານອື່ນຜູ້ອະນຸເຄາະຄືກັບພຣະຜູ້ເປັນເຈົ້າ
ຍ້ອນພຣະຜູ້ເປັນເຈົ້າອະນຸເຄາະໄວ້ຫຼາຍແລ້ວ
ຂ້ານ້ອຍຂໍຂາບໄຫວ້ພຣະຜູ້ເປັນເຈົ້າດ້ວຍຄວາມກະຕັນຍູ

[໑໑໓໐] ອັນໜຶ່ງ ບໍ່ວ່າໃນໂລກນີ້ຫຼືໂລກໜ້າ
ບໍ່ມີມຸນີທ່ານອື່ນຜູ້ອະນຸເຄາະຄືກັບພຣະຜູ້ເປັນເຈົ້າ
ຍ້ອນພຣະຜູ້ເປັນເຈົ້າອະນຸເຄາະໄວ້ຫຼາຍແລ້ວ
ຂ້ານ້ອຍຂໍຂາບໄຫວ້ພຣະຜູ້ເປັນເຈົ້າດ້ວຍຄວາມກະຕັນຍູ

**ໂຄປາລະວິມານທີ ໖ ຈົບ**

## ໗. ກັນຖະກະວິມານ
## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ມ້າກັນຖະກະ

(ພຣະມະຫາໂມກຄັນລານະເຖຣະຖາມເທບພະບຸດອົງໜຶ່ງວ່າ)

[໑໑໓໑] ໃນຄືນມື້ເພັງ ດວງຈັນມີຮອຍຮູບກະຕ່າຍ ເປັນໃຫຍ່ກວ່າໝູ່ດາວ
ມີໝູ່ດາວເລີກຫ້ອມລ້ອມ ໂຄຈອນໄປໂດຍຮອບສັນໃດ

[໑໑໓໒] ທິບພະວິມານນີ້ກໍມີອຸປະມາສັນນັ້ນ ໜ້າຢູ່
ມີຣັດສະໝີຮຸ່ງເຮືອງໃນເທບບຸຣີ ຄືພຣະອາທິດກຳລັງອຸໄທ
[໑໑໓໓] ມີພື້ນໜ້າອອນຊອນ ວິຈິດດ້ວຍແກ້ວໄພທູນ ຄຳ ແກ້ວຜຶກ
ເງິນ ແກ້ວລາຍ ແກ້ວມຸກດາ ແລະທັບທິມ

[໑໑໓໔] ລາດດ້ວຍແກ້ວໄພທູນ ປາງຜາສາດທັງຫຼາຍຂອງທ່ານ
ງາມໜ້າອອນຊອນ ຜາສາດເຊິ່ງເນຣະມິດໄວ້ດີແລ້ວ

[໑໑໓໕] ສະໂບກຂະຣະນີຂອງທ່ານໜ້າອອນຊອນ
ມີໝູ່ມັດສາທິບອາໄສຢູ່ເນືອງແໜ້ນ
ນ້ຳໃສສະອາດ ມີພື້ນລາດດ້ວຍຊາຍຄຳ
[໑໑໓໖] ເດຍລະດາດດ້ວຍບົວຫຼວງຫຼາກຫຼາຍຊະນິດ ບົວຂາວຫ້ອມລ້ອມຢູ່ຮອບ
ຍາມລົມພັດ ກໍໂຮຍກິ່ນຫອມຫວນຈູງໃຈ

[໑໑໗໗] ທັງສອງຂ້າງສະໂບກຂະຣະນີຂອງທ່ານນັ້ນ ມີພຸ່ມໄມ້ເນຣະມິດໄວ້ດີແລ້ວ
ເຊິ່ງປະກອບດ້ວຍໄມ້ດອກແລະຕົ້ນໄມ້ໃຫ້ຜົນທັງສອງຢ່າງ

[໑໑໗໘] ເທບອັບປະສອນທັງຫຼາຍພາກັນມາບຳລຸງທ່ານຜູ້ນັ່ງເທິງບັນລັງຕີນຄຳ
ທີ່ປູລາດດ້ວຍຜ້າຂົນສັດອັນອ່ອນນຸ່ມ ດັ່ງບຳລຸງທ້າວສັກກະເທວະຣາດ

[໑໑໗໙] ພວກນາງແຕ່ງອົງດ້ວຍເຄື່ອງປະດັບທັງມວນ
ປະດັບດ້ວຍພວງດອກໄມ້ຕ່າງ ໆ ປີ່ນເປີທ່ານຜູ້ມີລິດຫຼາຍໃຫ້ອອນຊອນ
ທ່ານມ່ວນຊື່ນບັນເທີງໃຈ ດັ່ງທ້າວວະສະວັດດີເທວະຣາຊະ

[໑໑໘໐] ທ່ານມີຄວາມຍິນດີໃນການຟ້ອນລຳ ຂັບຮ້ອງ ແລະເສບດົນຕີ
ອອນຊອນຢູ່ດ້ວຍກອງ ຫອຍສັງ ກອງຕະໂພນ ພິນ ແລະບັນເດາະ
[໑໑໘໑] ທ່ານມີຮູບ ສຽງ ກິ່ນ ຣົດ ແລະໂຜດຖັບພະຫຼາຍຢ່າງ
ລ້ວນເປັນທິບ ໜ້າອອນຊອນ ສົມຄວາມປະສົງ

[໑໑໘໒] ໃນວິມານອັນປະເສີດນັ້ນ ທ່ານເປັນເທບພະບຸດຜູ້ມີຣັດສະໝີຮຸ່ງເຮືອງຫຼາຍ
ມີຜິວພັນຮຸ່ງເຮືອງຍິ່ງ ດັ່ງພຣະອາທິດກຳລັງອຸໄທ

[໑໑໘໓] ນີ້ເປັນຜົນຂອງທານ ຫຼືສິນ ຫຼືການຂາບໄຫວ້ຂອງທ່ານ
ອາດຕະມາຖາມແລ້ວ ທ່ານໂຜດບອກຜົນກຳນັ້ນແກ່ອາດຕະມາເທີ້ນ

[໑໑໘໔] ເທບພະບຸດນັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ
ຈຶ່ງຕອບບັນຫາຜົນກຳໄປຕາມທີ່ພຣະເຖຣະຖາມວ່າ

[໑໑໘໕] ຂ້ານ້ອຍຄືພະຍາມ້າກັນຖະກະ ເປັນສະຫະຊາດ°ກັບພຣະຣາດຊະໂອຣົດຂອງ
ພຣະເຈົ້າສຸດໂທທະນະໃນເມືອງກະບິນລະພັດ
ຣາດຊະທານີທີ່ອຸດົມຂອງກະສັດສາກະຍະວົງ

[໑໑໘໖] ເວລາເມື່ອພຣະຣາດຊະໂອຣົດພຣະອົງນັ້ນສະເດັດອອກ
ເພື່ອພຣະໂພທິຍານໃນເວລາທ່ຽງຄືນ
ພຣະອົງຊົງໃຊ້ຝາພຣະຫັດທີ່ອ່ອນນຸ້ມ ມີພຣະນະຂາທີ່ແດງປັ່ງ

[໑໑໘໗] ກະຕຸ້ນຂ້ານ້ອຍ ແລະໄດ້ຮັບສັ່ງວ່າ
ພາໄປເທີ້ນ ສະຫາຍ ເຮົາບັນລຸພຣະສຳມາສຳໂພທິຍານອັນສູງສຸດແລ້ວ
ຈັກຊ່ອຍສັດໂລກໃຫ້ຂ້າມໂອຄະສົງສານ

[໑໑໗໗] ເມື່ອຂ້ານ້ອຍຟັງພຣະດຳຣັດນັ້ນ ມີຄວາມທັນສາແຈ່ມໃສຫຼາຍ
ເວລານັ້ນຂ້ານ້ອຍມີໃຈຍິນດີເບີກບານຮັບພຣະດຳຣັດ

[໑໑໗໘] ພໍຮູ້ວ່າພຣະສາກະຍະບຸດຜູ້ຊົງຍົດໃຫຍ່ປະທັບນັ່ງເທິງຫຼັງຂ້ານ້ອຍແລ້ວ
ຂ້ານ້ອຍກໍບັນເທີງເບີກບານໃຈໄດ້ນຳສະເດັດພຣະມະຫາບຸຣຸດອອກໄປ

[໑໑໘໐] ເຖິງແຄວ້ນຂອງກະສັດເຫຼົ່າອື່ນ ເມື່ອພຣະອາທິດຂຶ້ນ
ພຣະມະຫາບຸຣຸດນັ້ນກໍຊົງລະຂ້ານ້ອຍແລະສັນນະອຳມາດໄວ້
ບໍ່ໄດ້ຊົງອາໄລ ແລ້ວສະເດັດຫຼີກໄປ

[໑໑໘໑] ຂ້ານ້ອຍໄດ້ເລຍພຣະບາດທັງສອງເຊິ່ງມີພຣະນະຂາແດງຂອງພຣະອົງ
ແລະໄດ້ຮ້ອງໄຫ້ແນມເບິ່ງພຣະມະຫາວິຣະຜູ້ກຳລັງສະເດັດໄປ

[໑໑໘໒] ຍ້ອນບໍ່ໄດ້ພົບເຫັນພຣະສາກະຍະບຸດຜູ້ຊົງສິຣິພຣະອົງນັ້ນ
ຂ້ານ້ອຍຈຶ່ງປ່ວຍໜັກແລ້ວຕາຍຢ່າງທັນທີ

[໑໑໘໓] ດ້ວຍອານຸພາບແຫ່ງບຸນທີ່ປະກອບດ້ວຍຄວາມເຫຼື້ອມໃສນັ້ນແລ
ຂ້ານ້ອຍຈຶ່ງມາຢູ່ຄອບຄອງວິມານນີ້
ເຊິ່ງປະກອບດ້ວຍກາມມະຄຸນທິບທຸກຢ່າງ ໃນເທບບຸຣີນີ້ເອງ

[໑໑໘໔] ອັນໜຶ່ງ ຍ້ອນມີຄວາມຍິນດີທີ່ໄດ້ຟັງຂ່າວການບັນລຸພຣະໂພທິຍານ
ຍ້ອນມີກຸສົນເປັນມູນເຫດນັ້ນນັ້ນແລ
ຂ້ານ້ອຍກໍຈັກບັນລຸຄວາມສິ້ນອາສະວະໄດ້

[໑໑໘໕] ທ່ານຜູ້ຈະເລີນ ຖ້າພຣະຜູ້ເປັນເຈົ້າຈະເພິ່ງໄປ
ສຳນັກພຣະບໍຣົມມະສາດສະດາສຳມາສຳພຸດທະເຈົ້າ
ຂໍພຣະຜູ້ເປັນເຈົ້າຊ່ອຍຂາບທູນພຣະອົງເຖິງການຖວາຍອະພິວາດ
ດ້ວຍຂະໜ່ອມຕາມຄຳຂອງຂ້ານ້ອຍດ້ວຍເທີ້ນ

[໑໑໘໖] ແມ່ນຂ້ານ້ອຍກໍຈັກໄປເຝົ້າພຣະຊິນນະເຈົ້າເຊິ່ງຫາບຸກຄົນອື່ນປຽບບໍ່ໄດ້
ຍ້ອນວ່າການໄດ້ເຫັນພຣະໂລກນາດຜູ້ໝັ້ນຄົງຫາໄດ້ຍາກ

(ພຣະສັງຄີຕິກາຈານໄດ້ຣົດຈະນາຄາຖາໄວ້ ໔ ຄາຖາ ດັ່ງນີ້ວ່າ)

[໑໑໘໗] ກັນຖະກະເທບພະບຸດນັ້ນ
ເປັນຜູ້ກະຕັນຍູກະຕະເວທີ ເຂົ້າໄປເຝົ້າພຣະສາດສະດາ

ฟังพระดำรัดของพระสำมาสำพุดทะเจ้าผู้มีพระจักขุ
แล้วชำระทำจักขุให้บໍລິສຸດ[๑]

[๑๑๗๗] ເມື່ອຊຳຣະທິດຖິ ວິຈິກິດສາ
ແລະສີລັບພະຕະປະຣາມາດໃຫ້ບໍລິສຸດແລ້ວ
ຖວາຍອະພິວາດພຣະບາດທັງສອງພຣະສາດສະດາແລ້ວ
ຫາຍໄປໃນບ່ອນນັ້ນນັ້ນເອງ

**ກັນຖະກະວິມານທີ ໗ ຈົບ**

## ໘. ອະເນກະວັນນະວິມານ

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ເທບພະບຸດຜູ້ມີຣັດສະໝີຫຼາກສີ

(ພຣະມະຫາໂມກຄັນລານະເຖຣະຖາມເທບພະບຸດອົງໜຶ່ງວ່າ)

[໑໑໗໘] ທ່ານມີໝູ່ເທບອັບປະສອນຫ້ອມລ້ອມ ຂຶ້ນວິມານມີຣັດສະໝີຕ່າງ ໆ
ວິຈິດຫຼວງຫຼາຍ ເປັນທີ່ລະງັບຄວາມກະວົນກະວາຍແລະຄວາມໂສກເສົ້າ
ບັນເທີງຢູ່ ດັ່ງທ້າວສຸນິມມິດເທວະຣາຊະຜູ້ເປັນໃຫຍ່ກວ່າເທວະດາ

[໑໘໐໐] ບໍ່ມີຜູ້ສະເໝີຄືທ່ານ ອັນໜຶ່ງ ບໍ່ມີໃຜຢູ່ບ່ອນໃດຍິ່ງໄປກວ່າທ່ານ
ທັງດ້ານບໍລິວານຍົດ ດ້ານບຸນ ແລະດ້ານລິດ
ທວຍເທບທັງມວນແລະໝູ່ເທບຊັ້ນຕາວະຕິງສາພາກັນມາປະຊຸມ
ນອບນ້ອມທ່ານ ດັ່ງເທວະດາແລະມະນຸດທັງຫຼາຍນອບນ້ອມດວງຈັນ
ແລະເທບອັບປະສອນເຫຼົ່ານີ້ພາກັນມາຟ້ອນລຳຂັບຮ້ອງ
ໃຫ້ຄວາມບັນເທີງໃຈຮອບ ໆ ທ່ານ

[໑໘໐໑] ທ່ານໄດ້ບັນລຸເທວະລິດ ມີອານຸພາບຫຼາຍ
ເມື່ອທ່ານເກີດເປັນມະນຸດໄດ້ເຮັດບຸນອັນໃດໄວ້
ຍ້ອນບຸນອັນໃດທ່ານຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

[໑໘໐໒] ເທບພະບຸດນັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ
ຈຶ່ງຕອບບັນຫາຜົນກຳໄປຕາມທີ່ພຣະເຖຣະຖາມວ່າ

[໑໔໐໓]  ທ່ານຜູ້ຈະເລີນ ແຕ່ກ່ອນຂ້ານ້ອຍນັ້ນເປັນພຣະສາວິກາ
ຂອງພຣະຊິນນະເຈົ້າຊົງພຣະນາມວ່າສຸເມດ
ຍັງເປັນປຸຖຸຊົນ ບໍ່ໄດ້ຕັດສະຣູ້ ບວດຢູ່ ๗ ພັນສາ

[໑໔໐໔]  ເມື່ອພຣະຊິນນະເຈົ້າຊົງພຣະນາມວ່າສຸເມດຜູ້ເປັນພຣະສາດສະດາ
ຊົງຂ້າມໂອຄະ¹ໄດ້ແລ້ວ ຜູ້ໝັ້ນຄົງ ສະເດັດປະຣິນິບພານແລ້ວ
ຂ້ານ້ອຍນັ້ນໄຫວ້ຣັດຕະນະເຈດີເຊິ່ງຄຸມດ້ວຍຕາໜ່າງຄຳ
ແລ້ວໄດ້ເຮັດໃຈໃຫ້ເຫຼື້ອມໃສໃນພຣະສະຖູບ

[໑໔໐໕]  ຂ້ານ້ອຍບໍ່ໄດ້ໃຫ້ທານ ກໍຍ້ອນຂ້ານ້ອຍບໍ່ມີວັດຖຸສິ່ງຂອງທີ່ຈະໃຫ້
ແຕ່ໄດ້ຊັກຊວນຄົນອື່ນ ໆ ໃນການໃຫ້ທານນັ້ນວ່າ
ຂໍເຊີນທ່ານທັງຫຼາຍບູຊາພຣະບໍຣົມສາຣີຣິກະທາດ
ຂອງພຣະພຸດທະເຈົ້າຜູ້ຄວນບູຊານັ້ນ
ວ່າກັນວ່າ ດ້ວຍການບູຊາພຣະບໍຣົມສາຣີຣິກະທາດແນວນີ້
ທ່ານທັງຫຼາຍລະຈາກອັດຕະພາບນີ້ແລ້ວຈັກໄປສູ່ສະຫວັນ

[໑໔໐໖]  ຂ້ານ້ອຍໄດ້ເຮັດກຸສົນກຳນັ້ນໄວ້ທີ່ນີ້
ຕົນເອງຈຶ່ງສະເຫວີຍສຸກອັນເປັນທິບ
ບັນເທີງຢູ່ໃນທ່າມກາງໝູ່ເທວະດາຊັ້ນຕາວະຕິງສາ ທັງຍັງບໍ່ໝົດບຸນ

**ອະເນກະວັນນະວິມານທີ ๗ ຈົບ**

## ໘. ມັດຖະກຸນທະລີວິມານ

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ມັດຖະກຸນທະລີມານົບ

## ຜູ້ເຮັດໃຈໃຫ້ເຫຼື້ອມໃສໃນພຣະພຸດທະເຈົ້າກ່ອນສິ້ນໃຈ

(ພາມຖາມເທບພະບຸດຕົນນັ້ນວ່າ)

[໑໔໐๗]  ເຈົ້າປະດັບຕົກແຕ່ງຮ່າງກາຍ ໃສ່ຕຸ້ມຫູກັງງ
ທັດຊົງດອກໄມ້ ມີກາຍລູບທາດ້ວຍຈຸນແກ່ນຈັນແດງ
ປະຄອງແຂນຮ່ຳໄຮຢູ່ກາງປ່າ
ເຈົ້າເປັນທຸກເລື້ອງອັນໃດ

(ມັດຖະກຸນທະລິເທບພະບຸດຕອບວ່າ)

[໑໘໐໗] ເຮືອນລົດທີ່ເຮັດດ້ວຍຄຳ ງາມຜຸດຜ່ອງເກີດຂຶ້ນແກ່ເຮົາ
ເຮົາຍັງຫາລໍ້ລົດທັງຄູ່ນັ້ນບໍ່ໄດ້
ຍ້ອນຄວາມທຸກນັ້ນ ເຮົາຈັກຍອມສະລະຊີວິດ

(ພາມກ່າວວ່າ)

[໑໘໐໙] ພໍ່ມານົບຜູ້ຈະເລີນ ລໍ້ຄຳ ລໍ້ແກ້ວມະນີ ລໍ້ທອງແດງ
ຫຼືລໍ້ເງິນ ຈົ່ງບອກຂ້ອຍມາ ຂ້ອຍຈະຈັດລໍ້ທັງຄູ່ໃຫ້ເຈົ້າ

[໑໘໑໐] ມານົບນັ້ນກ່າວແກ່ພາມນັ້ນວ່າ
ດວງຈັນແລະດວງອາທິດທັງສອງຍ່ອມຜາກົດໃນທ້ອງຟ້ານັ້ນ
ລົດຄຳຂອງເຮົາຍ່ອມງາມດ້ວຍລໍ້ທັງຄູ່ນັ້ນ

(ພາມກ່າວວ່າ)

[໑໘໑໑] ມານົບ ເຈົ້າໂງ່ແທ້ ທີ່ມາປາຖະໜາສິ່ງທີ່ບໍ່ຄວນປາຖະໜາ
ຂ້ອຍເຂົ້າໃຈວ່າ ເຈົ້າຈັກຕາຍສາຊື່ ໆ
ຍ້ອນເຈົ້າບໍ່ມີທາງທີ່ຈະໄດ້ດວງຈັນແລະດວງອາທິດເລີຍ

(ມານົບກ່າວວ່າ)

[໑໘໑໒] ແມ່ນການໂຄຈອນໄປມາຂອງດວງຈັນແລະດວງອາທິດກໍຍັງຜາກົດຢູ່
ຣັດສະໝີກໍຍັງຜາກົດຢູ່ໃນວິຖີທັງສອງ
ສ່ວນຄົນທີ່ຕາຍໄປແລ້ວຍ່ອມບໍ່ຜາກົດ
ເຮົາທັງສອງຜູ້ຮ້ອງໄຫ້ຮ່ຳໄຮຢູ່ໃນບ່ອນນີ້
ໃຜນໍໂງ່ກວ່າກັນ

(ພາມກ່າວວ່າ)

[໑໘໑໓] ມານົບ ເຈົ້າເວົ້າຈິງແທ້ ເຮົາທັງສອງຜູ້ຮ້ອງໄຫ້ຮ່ຳໄຮຢູ່
ຂ້ອຍນີ້ແລ້ວໂງ່ກວ່າ ທີ່ມາປາຖະໜາຄົນທີ່ຕາຍໄປແລ້ວ
ຄືເດັກອ່ອນຮ້ອງໄຫ້ຢາກໄດ້ດວງຈັນ

[໑໘໑໔] ເຈົ້າຊ່ອຍລະງັບຂ້ອຍຜູ້ຮ້ອນຮົນໃຫ້ສະງົບ

ດັບຄວາມກະວົນກະວາຍທັງໝົດໄດ້
ຄືຄົນໃຊ້ນໍ້າທິດມອດໄຟທີ່ໄໝ້ໄຂງົວ

[໑໘໑໕] ເຈົ້າບັນເທົາຄວາມໂສກເສົ້າເຖິງບຸດຂອງຂ້ອຍຜູ້ກຳລັງເສົ້າໂສກ
ຊື່ວ່າໄດ້ຊ່ອຍຖອນລູກສອນຄືຄວາມໂສກ
ເຊິ່ງສຽບທີ່ຫົວໃຈຂອງຂ້ອຍອອກໄດ້ແລ້ວນໍ

[໑໘໑໖] ມານົບ ຂ້ອຍເຊິ່ງເຈົ້າຊ່ອຍຖອນລູກສອນຄືຄວາມໂສກຂຶ້ນໃຫ້ແລ້ວ
ກໍເຢັນສະງົບແລ້ວ ຈະບໍ່ເສົ້າໂສກ ບໍ່ຮ້ອງໄຫ້ ຍ້ອນໄດ້ຟັງຄຳຂອງເຈົ້າ

(ພາມເມື່ອຈະຖາມຕໍ່ໄປ ຈຶ່ງກ່າວວ່າ)

[໑໘໑໗] ເຈົ້າເປັນເທວະດາຫຼືຄົນທັບ ຫຼືເປັນທ້າວສັກກະປຸຣິນທະທະ
ເຈົ້າເປັນໃຜ ເປັນບຸດຂອງໃຜນໍ ຂ້ອຍຈະຮູ້ຈັກເຈົ້າໄດ້ແນວໃດ

(ມານົບເປີດເຜີຍຕົນແກ່ພາມນັ້ນວ່າ)

[໑໘໑໘] ທ່ານເອງເຜົາບຸດຄົນໃດທີ່ປ່າຊ້າແລ້ວ
ຮ່ຳໄຮຮ້ອງໄຫ້ເຖິງບຸດຄົນໃດ
ບຸດຄົນນັ້ນຄືເຮົາເອງ ເຊິ່ງເຮັດກຸສົນກຳແລ້ວ
ໄດ້ເກີດຮ່ວມກັບໝູ່ເທບຊັ້ນໄຕຣທິດ

(ພາມຖາມວ່າ)

[໑໘໑໙] ເມື່ອເຈົ້າໃຫ້ທານໜ້ອຍຫຼືຫຼາຍ ໃນເຮືອນຂອງຕົນ
ຫຼືຮັກສາອຸໂປສົດກຳເຊັ່ນນັ້ນ ຂ້ອຍບໍ່ໄດ້ເຫັນ
ຍ້ອນກຳອັນໃດເຈົ້າຈຶ່ງໄປເທວະໂລກໄດ້

(ມານົບຕອບວ່າ)

[໑໘໒໐] ເຮົາປ່ວຍເປັນໄຂ້ ທຸກທໍລະມານ
ມີກາຍກະສັບກະສ່າຍຢູ່ໃນບ່ອນຢູ່ຂອງຕົນ
ໄດ້ເຫັນພຣະສຳມາສຳພຸດທະເຈົ້າຜູ້ປາສະຈາກກິເລດດັ່ງທຸລີ
ຊຶ່ງຂ້າມພົ້ນຄວາມສົງໄສ ສະເດັດໄປດີແລ້ວ ມີພຣະປັນຍາບໍ່ຕ່ຳຊາມ

[໑໘໒໑] ເຮົານັ້ນມີໃຈເບີກບານ ມີຈິດເຫຼື້ອມໃສ

ໄດ້ທຳອັນຊະລີກຳແດ່ພຣະຕະຖາຄົດເຈົ້າ
ເມື່ອເຮັດກຸສົນກຳນັ້ນແລ້ວ ໄດ້ເກີດຮ່ວມກັບໝູ່ເທບຊັ້ນໄຕຣທິດ

(ພາມກ່າວວ່າ)

[໑໘໘໘] ໜ້າອັດສະຈັນຈິງ ບໍ່ເຄີຍມີມາແລ້ວນໍ
ອັນຊະລີກຳມີຜົນເປັນໄດ້ເຖິງປານນີ້
ແມ່ນເຮົາກໍມີໃຈເບີກບານ ມີຈິດເຫຼື້ອມໃສ
ຈຶ່ງຂໍເຖິງພຣະພຸດທະເຈົ້າເປັນບ່ອນເພິ່ງບ່ອນຣະນຶກໃນມື້ນີ້ນີ້ເອງ

(ມານົບກ່າວວ່າ)

[໑໘໘໙] ທ່ານຈົ່ງມີຈິດເຫຼື້ອມໃສ ເຖິງພຣະພຸດທະເຈົ້າ ພຣະທຳ
ແລະພຣະສົງເປັນບ່ອນເພິ່ງບ່ອນຣະນຶກໃນມື້ນີ້ນີ້ແລ້ວ
ອັນໜຶ່ງ ທ່ານຈົ່ງສະມາທານສິກຂາບົດ ໕ ຢ່າໃຫ້ຂາດແລະດ່າງພ້ອຍ

[໑໘໘໔] ຄື ຈົ່ງພ້າວງົດເວັ້ນຈາກການຂ້າສັດ ຈາກການລັກຊັບ
ຍິນດີສະເພາະພັນລະຍາຂອງຕົນ ຢ່າກ່າວຕົວະ ຢ່າດື່ມນ້ຳເມົາ

(ພາມກ່າວວ່າ)

[໑໘໘໕] ເທວະດາຜູ້ໜ້າບູຊາ ທ່ານເປັນຜູ້ປາຖະໜາປະໂຫຍດ
ຫວັງຄວາມເກື້ອກູນຜູ້ຂ້າ
ຜູ້ຂ້າຈະເຮັດຕາມຄຳຂອງທ່ານ ທ່ານເປັນອາຈານຂອງຜູ້ຂ້າ

[໑໘໘໖] ຜູ້ຂ້າຂໍເຖິງພຣະພຸດທະເຈົ້າ ພຣະທຳອັນປະເສີດ
ແລະພຣະສົງສາວົກຂອງພຣະພຸດທະເຈົ້າ
ຜູ້ຊຶ່ງເປັນເທບຂອງນໍຣະຊົນເປັນບ່ອນເພິ່ງບ່ອນຣະນຶກ

[໑໘໘໗] ຜູ້ຂ້າຈະພ້າວງົດເວັ້ນຈາກການຂ້າສັດ ຈາກການລັກຊັບ
ຍິນດີສະເພາະພັນລະຍາຂອງຕົນ ບໍ່ກ່າວຕົວະ ບໍ່ດື່ມນ້ຳເມົາ

**ມັດຖະກຸນທະລີວິມານທີ ໗ ຈົບ**

# ໑໐. ເສຣິດສະກະວິມານ

## ວ່າດ້ວຍວິມານໄມ້ສົ້ມກົບທີ່ເກີດຂຶ້ນແກ່ເຈົ້າປາຍາສິ

(ພຣະຄະວໍາປະຕິກ່າວວ່າ)

[໑໘໗] ທ່ານທັງຫຼາຍຈົ່ງຟັງຄໍາຂອງເທວະດາແລະພວກພໍ່ຄ້າ
ທີ່ໄດ້ມາພົບກັນໃນທະເລຊາຍໃນເວລານັ້ນ
ແລະຂໍເຊີນທຸກທ່ານຟັງຄໍາເວົ້າຕາມທີ່ເທວະດາແລະພວກພໍ່ຄ້າສົນທະນາກັນ

[໑໘໘] ຍັງມີພຣະຣາຊາພຣະນາມວ່າປາຍາສິໄດ້ເກີດຮ່ວມກັບໝູ່ພຸມເທວະດາ
ມີບໍລິວານຍົດ ບັນເທີງຢູ່ໃນວິມານຂອງຕົນ
ເປັນເທວະດາແຕ່ໄດ້ມາສົນທະນາກັບພວກມະນຸດ

(ເສຣິດສະກະເທບພະບຸດຖາມພວກພໍ່ຄ້າດ້ວຍຄາຖາວ່າ)

[໑໘໙] ມະນຸດທັງຫຼາຍ ຜູ້ຍ້ານທາງຄົດຄ້ຽວ ມີໃຈຫວາດຫວັ່ນຢູ່
ໃນບ່ອນໜ້າຣະແວງວ່າມີໄພ ໃນປ່າ ໃນຖິ່ນຂອງອະມະນຸດ
ໃນທາງກັນດານເຊິ່ງມີນໍ້າ ມີອາຫານບໍ່ພຽງພໍ
ຍ່າງໄປໄດ້ແສນຍາກ ທ່າມກາງທະເລຊາຍ

[໑໙໐] ໃນທາງທະເລຊາຍນີ້ ບໍ່ມີໝາກໄມ້ ບໍ່ມີເຜືອກມັນ
ບໍ່ມີເຊື້ອໄຟ ໃນທາງທະເລຊາຍນີ້ ຈັກຫາອາຫານໄດ້ແຕ່ບ່ອນໃດ
ນອກຈາກຝຸ່ນແລະຊາຍທີ່ແດດແຜດເຜົາທັງຮ້ອນທັງທາລຸນ

[໑໙໑] ບ່ອນນີ້ເປັນບ່ອນໂນນ ຮ້ອນດັ່ງແຜ່ນເຫຼັກເຜົາໄຟ
ຫາຄວາມສະບາຍບໍ່ໄດ້ ທຽບທໍ່ນະຣົກ
ສະຖານທີ່ນີ້ເປັນບ່ອນຢູ່ດັ້ງເດີມຂອງພວກຫຍາບຊ້າມີຜີສາດເປັນຕົ້ນ
ເປັນພູມປະເທດຄືຖືກສາບໄວ້

[໑໙໒] ອັນໜຶ່ງ ພວກທ່ານຫວັງອັນໃດ
ຍ້ອນເຫດໃດຈຶ່ງບໍ່ພິຈາລະນາໃຫ້ຖີ່ຖ້ວນ
ນໍາກັນເຂົ້າມາຍັງປະເທດຖິ່ນນີ້ພ້ອມກັນ
ຍ້ອນຄວາມໂລບ ຄວາມຢ້ານ ຫຼືຍ້ອນຫຼົງທາງ

(ພວກພໍ່ຄ້າຕອບວ່າ)

[໑໔໓໔] ພວກຂ້ານ້ອຍນັ້ນ ເປັນພໍ່ຄ້າກວຽນຢູ່ໃນແຄວ້ນມະຄົດແລະແຄວ້ນອັງຄະ
ຕ້ອງການຊັບ ຫວັງກຳໄລ ຈຶ່ງບັນທຸກສິນຄ້າມາຫຼາຍ
ພາກັນໄປສູ່ສິນທຸແລະໂສວີຣະປະເທດ

[໑໔໓໕] ກາງເວັນ ພວກຂ້ານ້ອຍທຸກຄົນທົນຄວາມຫິວນ້ຳບໍ່ໄດ້
ທັງມຸ້ງຫວັງຈະອະນຸເຄາະສັດພາຫະນະ
ຈຶ່ງຟ້າວເດີນທາງມາໃນກາງຄືນເຊິ່ງເປັນເວລາວິການ

[໑໔໓໖] ພວກຂ້ານ້ອຍນັ້ນໄປຜິດທາງ ຈຶ່ງຫຼົງທາງ
ສັບສົນຄືຄົນຕາບອດ ຍ່າງຫຼົງເຂົ້າໄປໃນປ່າທີ່ໄປໄດ້ຍາກແສນຍາກ
ທ່າມກາງທະເລຊາຍ ເກີດງຸນງົງສົງໄສບໍ່ຮູ້ທິດທາງ

[໑໔໓໗] ທ່ານທີ່ຄວນບູຊາ ພວກຂ້ານ້ອຍໄດ້ພົບວິມານອັນປະເສີດ
ແລະໂຕທ່ານເຊິ່ງບໍ່ເຄີຍພົບເຫັນມາກ່ອນນີ້
ຈຶ່ງຫວັງຈະລອດຊີວິດຍິ່ງກວ່າແຕ່ກ່ອນ
ຍ້ອນໄດ້ເຫັນຈຶ່ງພາກັນແຈ່ມໃສ ດີໃຈແລະເບີກບານໃຈ

(ເທບພະບຸດຖາມວ່າ)

[໑໔໓໘] ຍ້ອນໂພຄະຊັບເປັນເຫດ ພວກທ່ານຈຶ່ງພາກັນໄປສູ່ທິດຕ່າງ ໆ
ຄື ຝັ່ງສະມຸດ ທະເລຊາຍ ທາງທີ່ຕ້ອງໃຊ້ເຄືອຫວາຍ
ທາງທີ່ຕ້ອງຕອກຫອຍ ທາງທີ່ມີແມ່ນ້ຳ ແລະທາງພູທີ່ໄປໄດ້ຍາກ

[໑໔໓໙] ພໍ່ຄ້າທັງຫຼາຍ ພວກທ່ານໄດ້ໄປສູ່ແຄວ້ນຂອງພຣະຣາຊາອື່ນ ໆ
ພົບເຫັນຜູ້ຄົນຊາວຕ່າງປະເທດ
ພວກເຮົາຂໍຟັງສິ່ງອັດສະຈັນທີ່ພວກທ່ານໄດ້ຍິນຫຼືໄດ້ເຫັນມາ

(ພວກພໍ່ຄ້າຕອບວ່າ)

[໑໔໔໐] ກຸມານ ສົມບັດຂອງມະນຸດທີ່ຜ່ານມາທັງໝົດ
ເຊິ່ງອັດສະຈັນກວ່າວິມານຂອງທ່ານແມ່ນນີ້
ພວກຂ້ານ້ອຍບໍ່ເຄີຍໄດ້ຍິນຫຼືໄດ້ເຫັນມາກ່ອນ
ວິມານຂອງທ່ານເຊິ່ງມີຣັດສະໝີບໍ່ຊົ່ວ ພວກຂ້ານ້ອຍແລເບິ່ງແລ້ວບໍ່ອີ່ມເລີຍ

[໑໔໔໑] ທີ່ວິມານຂອງທ່ານນີ້ ມີສະໂບກຂະຣະນີລອຍຢູ່ໃນອາກາດ
ມີສວນດອກໄມ້ຫຼວງຫຼາຍ ມີບົວຂາວຫຼາຍ
ມີໝູ່ໄມ້ແຕກດອກອອກຜົນຢູ່ປະຈຳ ໂຣຍກິ່ນຫອມກະຈາຍອົບອວນ

[໑໔໔໘] ເສົາວິມານເຫຼົ່ານີ້ເປັນເສົາແກ້ວໄພທູນ ສູງ ໑໐໐ ສອກ
ປະດັບດ້ວຍແກ້ວຜຶກ ແກ້ວປະພານ ແກ້ວເພທາຍ
ແລະທັບທິມ ມີຣັດສະໝີສະຫວ່າງສະໄຫວ

[໑໔໔໓] ວິມານຂອງທ່ານນີ້ມີເສົາ ໑,໐໐໐ ຕົ້ນ ພາຍໃນປະກອບດ້ວຍແກ້ວ
ພາຍນອກອ້ອມຮອບດ້ວຍໄພທີຄຳ ແລະມຸງບັງຢ່າງດີດ້ວຍແຜ່ນຄຳ
ມີອານຸພາບຫາບ່ອນປຽບບໍ່ໄດ້ ງາມຢູ່ເທິງເສົາເຫຼົ່ານັ້ນ

[໑໔໔໔] ວິມານຂອງທ່ານນີ້ສະຫວ່າງສະໄຫວດ້ວຍຄຳຊົມພູນຸດຊັ້ນເລີດ
ທຸກສ່ວນຂອງວິມານກ້ຽງເກົາດີ ປະກອບດ້ວຍຂັ້ນໄດແລະພື້ນໜ້າພໍໃຈ
ໝັ້ນຄົງ ງົດງາມ ມີສ່ວນປະກອບກົມກືນ ຊວນພິດຢ່າງຍິ່ງ ໜ້າພໍໃຈ

[໑໔໔໕] ພາຍໃນວິມານແກ້ວ ມີເຂົ້ານ້ຳອຸດົມສົມບູນ
ໂຕທ່ານມີໝູ່ເທບອັບປະສອນຫ້ອມລ້ອມ
ກຶກກ້ອງດ້ວຍສຽງກອງຕະໂພນ ເປິງມາງແລະດຸຣິຍາງ
ເປັນຜູ້ທີ່ຫວຍເທບນອບນ້ອມແລ້ວດ້ວຍການຊົມເຊີຍແລະຂາບໄຫວ້

[໑໔໔໖] ໂຕທ່ານນັ້ນມີອານຸພາບສຸດທີ່ຈະຄິດ ປະກອບດ້ວຍຄຸນທຸກຢ່າງ
ອັນໝູ່ເທບນາຣີປຸກເຮົ້າ ບັນເທີງຢູ່ໃນວິມານຜາສາດທີ່ປະເສີດ
ໜ້າອອນຊອນ ດັ່ງທ້າວເວດສະວັນ ບັນເທີງຢູ່ໃນນະລິນີສະຖານ[๑]

[໑໔໔໗] ທ່ານເປັນເທວະດາຫຼືເປັນຍັກ
ເປັນທ້າວສັກກະຈອມເທບຫຼືເປັນມະນຸດ
ພວກພໍ່ຄ້າກວຽນຖາມທ່ານ ໂຜດບອກເທີ້ນ
ທ່ານເປັນເທວະດາຊື່ອັນໃດ

(ເທບພະບຸດຕອບວ່າ)

[໑໔໔໙] ເຮົາເປັນເທວະດາຊື່ເສຣີສະກະ ເປັນຜູ້ຮັກສາທາງກັນດານ
ຄຸ້ມຄອງທາງທະເລຊາຍ ເຮັດຕາມຄຳສັ່ງຂອງທ້າວເວດສະວັນ
ຈຶ່ງດູແລຮັກສາປະເທດຖິ່ນນີ້ຢູ່

(ພວກພໍ່ຄ້າຖາມວ່າ)

[໑໘໔໙] ວິມານນີ້ທ່ານໄດ້ຕາມຄວາມປາຖະໜາຫຼືເກີດໂດຍຄວາມປ່ຽນແປງ
ທ່ານເຮັດເອງຫຼືເທວະດາທັງຫຼາຍມອບໃຫ້
ພວກພໍ່ຄ້າກວຽນຖາມທ່ານວ່າ ວິມານທີ່ໜ້າພໍໃຈນີ້ທ່ານໄດ້ມາແນວໃດ

(ເທບພະບຸດຕອບວ່າ)

[໑໘໕໐] ວິມານນີ້ບໍ່ແມ່ນເຮົາໄດ້ຕາມຄວາມປາຖະໜາ
ບໍ່ແມ່ນເກີດໂດຍການປ່ຽນແປງ
ບໍ່ແມ່ນເຮົາເຮັດເອງ ທັງບໍ່ແມ່ນເທວະດາທັງຫຼາຍມອບໃຫ້
ວິມານທີ່ໜ້າພໍໃຈນີ້ເຮົາໄດ້ມາດ້ວຍບຸນກຳອັນດີງາມຂອງຕົນ

(ພວກພໍ່ຄ້າຖາມວ່າ)

[໑໘໕໑] ອັນໃດເປັນຂໍ້ວັດປະຕິບັດແລະເປັນພົມມະຈັນຂອງທ່ານ
ນີ້ເປັນວິບາກແຫ່ງບຸນກຳອັນໃດທີ່ທ່ານສັ່ງສົມໄວ້ດີແລ້ວ
ພວກພໍ່ຄ້າກວຽນຖາມທ່ານວ່າ ວິມານນີ້ທ່ານໄດ້ມາແນວໃດ

(ເທບພະບຸດຕອບວ່າ)

[໑໘໕໒] ເຮົາໄດ້ມີນາມວ່າ ປາຍາສິ
ເມື່ອຄັ້ງເຮົາຄອງຣາດຊະສົມບັດໃນແຄວ້ນໂກສົນ
ເຮົາເປັນນັດຖິກະທິດຖິ[១] ເປັນຄົນຂີ້ຖີ່
ມີທຳຊົ່ວຊາມ ແລະມີປົກກະຕິກ່າວວ່າຂາດສູນ[៦]

[໑໘໕໓] ໄດ້ມີສະມະນະນາມວ່າ ກຸມານກັດສະປະ ເປັນພະຫູສູດ
ຜູ້ເລີດທາງກ່າວທຳໄດ້ຢ່າງວິຈິດມ່ອນ
ຄັ້ງນັ້ນທ່ານໄດ້ກ່າວທຳມະກະຖາໂຜດເຮົາ
ໄດ້ຊ່ອຍບັນເທົາທິດຖິທີ່ເປັນຂ້າເສິກທາງໃຈ[១]ຂອງເຮົາໄດ້

[໑໘໕໔] ເຮົາຟັງທຳມະກະຖາຂອງທ່ານນັ້ນແລ້ວ ໄດ້ປະກາດຕົນເປັນອຸປາສົກ
ງົດເວັ້ນຈາກການຂ້າສັດ ຈາກການລັກຊັບ
ຍິນດີສະເພາະພັນລະຍາຂອງຕົນ ບໍ່ກ່າວຕົວະ ບໍ່ດື່ມນ້ຳເມົາ

[໑໘໕໕] ຂໍ້ນັ້ນ ເປັນຂໍ້ວັດປະຕິບັດ ແລະເປັນພົມມະຈັນຂອງເຮົາ

ນີ້ເປັນວິບາກແຫ່ງບຸນກຳນັ້ນທີ່ເຮົາສັ່ງສົມໄວ້ດີແລ້ວ
ວິມານນີ້ເຮົາໄດ້ມາດ້ວຍບຸນກຳອັນດີງາມນັ້ນນັ້ນເອງ

(ພວກພໍ່ຄ້າຖາມວ່າ)

[໑໔໕໖] ຮູ້ມາວ່າ ຄົນມີປັນຍາທັງຫຼາຍເວົ້າແຕ່ຄຳຈິງ
ຄຳເວົ້າຂອງບັນດິດທັງຫຼາຍຈຶ່ງບໍ່ກັບກາຍເປັນແນວອື່ນ
ຄົນເຮັດບຸນໄວ້ຈະໄປໃນບ່ອນໃດຍ່ອມມີແຕ່ສິ່ງທີ່ໜ້າຮັກໜ້າຕ້ອງການ
ບັນເທີງຢູ່ໃນບ່ອນນັ້ນ

[໑໔໕໗] ຢູ່ບ່ອນໃດມີຄວາມໂສກ ຄວາມຮ້ອງໄຫ້
ການຂ້າ ການຄຸມຂັງ ແລະເຫດເກີດເລື້ອງຊົ່ວຮ້າຍ [໔]
ຄົນເຮັດບາບໄວ້ກໍຈະໄປໃນບ່ອນນັ້ນ
ບໍ່ພົ້ນຈາກຄະຕິທີ່ຊົ່ວໄປໄດ້ ບໍ່ວ່າການໃດ ໆ

[໑໔໕໘] ກຸມານ ຍ້ອນເຫດອັນໃດນໍ
ເທບບໍລິວານຈຶ່ງເປັນຄືຜູ້ຟັ່ນເຟືອນໄປໃນບໍ່ດົນນີ້
ຄືນ້ຳໃສຖືກກວນໃຫ້ຂຸ່ນ
ຍ້ອນເຫດອັນໃດນໍ ເທບບໍລິວານນີ້ແລະໂຕທ່ານຈຶ່ງໄດ້ມີຄວາມໂທມະນັດ

(ເທບພະບຸດຕອບວ່າ)

[໑໔໕໙] ພໍ່ທັງຫຼາຍ ກິ່ນທິບເຫຼົ່ານີ້ໂຮຍກິ່ນຫອມຫວນຈາກປ່າໄມ້ສົ້ມກົບ
ຫອມກະຈາຍອົບອວນໄປທົ່ວວິມານນີ້
ກຳຈັດຄວາມມືດໄດ້ທັງກາງເວັນແລະກາງຄືນ

[໑໔໖໐] ລ່ວງໄປ ໑໐໐ ປີ ຝັກໄມ້ສົ້ມກົບເຫຼົ່ານີ້ແຕ່ລະຝັກກໍຈະແຕກອອກ
ເປັນທີ່ຮູ້ກັນວ່າ ໑໐໐ ປີຂອງມະນຸດລ່ວງໄປແລ້ວ
ຕັ້ງແຕ່ເຮົາເກີດໃນໝູ່ເທວະດານີ້

[໑໔໖໑] ພໍ່ທັງຫຼາຍ ເຮົາຮູ້ເຫັນແລ້ວວ່າ
ເຮົາຈັກດຳລົງຢູ່ໃນວິມານນີ້ພຽງ ໕໐໐ ປີທິບ
ແລ້ວຈຶ່ງຈຸຕິຍ້ອນສິ້ນບຸນ ສິ້ນອາຍຸ
ເຮົາຈຶ່ງຈຸກເຈົ່າຍ້ອນຄວາມໂສກນັ້ນນັ້ນເອງ

(ພວກພໍ່ຄ້າກ່າວວ່າ)

[໑໔໗໔] ຜູ້ທີ່ໄດ້ວິມານເຊິ່ງຫາບ່ອນປຽບບໍ່ໄດ້ເປັນເວລາດົນປານນັ້ນ
ຈະເພິ່ງເສົ້າໂສກໄປເຮັດຫຍັງນໍ
ແຕ່ພວກຜູ້ມີບຸນໜ້ອຍເຂົ້າຢູ່ວິມານຊົ່ວເວລາສັ້ນ ໆ
ນັ້ນແລຄວນເສົ້າໂສກແທ້

(ເທບພະບຸດກ່າວວ່າ)

[໑໔໗໕] ພໍ່ທັງຫຼາຍ ຂໍ້ທີ່ທ່ານທັງຫຼາຍກ່າວວາຈາທີ່ໜ້າຮັກກັບເຮົາ
ນັ້ນເປັນການກ່າວຕັກເຕືອນອັນສົມຄວນແກ່ເຮົາ
ສ່ວນເຮົາຈະນຳຄຸ້ມຄອງທ່ານທັງຫຼາຍ
ເຊີນທ່ານທັງຫຼາຍໄປສູ່ທີ່ທີ່ທ່ານທັງຫຼາຍປາຖະໜາໂດຍຄວາມໂດຍປອດໄພເທີ້ນ

(ພວກພໍ່ຄ້າກ່າວວ່າ)

[໑໔໗໖] ຂ້ານ້ອຍທັງຫຼາຍຕ້ອງການຊັບ ຫວັງກຳໄລ
ຈຶ່ງພາກັນໄປສູ່ສິນທຸແລະໂສວີຣະປະເທດ
ແລ້ວຈັກພະຍາຍາມຄ້າຂາຍຕາມທີ່ຕັ້ງໃຈໄວ້ ມີການເສຍສະລະຢ່າງບໍຣິບູນ
ທຳການບູຊາເສຣີດສະກະເທບພະບຸດຢ່າງມະໂຫລານ

(ເທບພະບຸດກ່າວວ່າ)

[໑໔໗໗] ທ່ານທັງຫຼາຍຢ່າໄດ້ທຳການບູຊາເສຣີດສະກະເທບພະບຸດເລີຍ
ສິ່ງທີ່ທ່ານທັງຫຼາຍເວົ້າເຖິງທັງໝົດຈັກມີແກ່ພວກທ່ານ
ທ່ານທັງຫຼາຍຈົ່ງງົດເວັ້ນກຳຊົ່ວແລະຈົ່ງຕັ້ງໃຈປະພຶດທຳເທີ້ນ

[໑໔໗໘] ໃນໝູ່ພໍ່ຄ້າກວຽນນີ້ ມີອຸປາສົກຜູ້ເປັນພະຫູສູດ
ປະກອບດ້ວຍສິນແລະຂໍ້ວັດປະຕິບັດ ມີສັດທາ ມີຈາຄະ ມີສິນເປັນທີ່ຮັກຍິ່ງ
ມີວິຈາຣະນະຍານ ສັນໂດດ ມີຄວາມຮູ້

[໑໔໗໙] ບໍ່ເວົ້າຕົວະທັງທີ່ຮູ້ຢູ່ ບໍ່ຄິດບຽດບຽນຜູ້ອື່ນ
ບໍ່ເວົ້າສັບສໍ່ໃຫ້ເຂົາແຕກກັນ
ເວົ້າແຕ່ວາຈາອ່ອນຫວານລະມຸນລະໄມ

[໑໔໘໐] ເຂົາມີຄວາມເຄົາລົບ ຢຳເກງ ມີວິໄນ

ບໍ່ເປັນຄົນຊົ່ວ ເປັນຄົນບໍລິສຸດໃນອະທິສິນ
ມີຄວາມປະພຶດປະເສີດ ລ້ຽງດູມານດາບິດາໂດຍຖືກຕ້ອງຕາມທຳ

[໑໔໖໙] ເຂົາຄົງຈະສະແຫວງຫາໂພຄະຊັບ ຍ້ອນເຫດແຫ່ງມານດາບິດາ
ບໍ່ແມ່ນຍ້ອນເຫດແຫ່ງຕົນ ເມື່ອມານດາບິດາລ່ວງລັບໄປ
ເຂົາກໍນ້ອມໄປໃນເນກຂຳມະ ປະພຶດພົມມະຈັນ

[໑໔໗໐] ເຂົາເປັນຄົນຊື່ກົງ ບໍ່ຄົດໂກງ ບໍ່ໂອ້ອວດ ບໍ່ຂີ້ສໍ້
ບໍ່ເວົ້າມີເລດໄນ ເຂົາເຮັດແຕ່ກຳດີ
ຕັ້ງຢູ່ໃນທຳແນວນີ້ ຈະເພິ່ງໄດ້ຮັບທຸກແນວໃດນໍ

[໑໔໗໑] ຍ້ອນອຸປາສົກນັ້ນເປັນເຫດ ເຮົາຈຶ່ງໄດ້ຜາກົດໂຕ
ພໍ່ຄ້າທັງຫຼາຍ ຍ້ອນແນວນັ້ນ ທ່ານທັງຫຼາຍຈຶ່ງເຫັນທຳເຫີ້ນ
ຍ້ອນເວັ້ນອຸປາສົກນັ້ນສາແລ້ວ ທ່ານທັງຫຼາຍຈະສັບສົນ
ຄືຄົນຕາບອດຫຼົງເຂົ້າໄປໃນປ່າເປັນເຖົ່າຖ່ານໄປ
ການປະຖິ້ມຜູ້ອື່ນເປັນການງ່າຍສຳລັບຄົນທົ່ວໄປ
(ແຕ່ເປັນການຍາກສຳລັບສັດຕະບຸຣຸດ)
ການຄົບຫາສັດຕະບຸຣຸດຈຶ່ງນຳຄວາມສຸກມາໃຫ້ຢ່າງແທ້ຈິງ

(ພວກພໍ່ຄ້າຖາມວ່າ)

[໑໔໗໒] ອຸປາສົກຄົນນັ້ນຄືໃຜ ແລະເຮັດວຽກອັນໃດ
ເຂົາຊື່ອັນໃດ ແລະໂຄດອັນໃດ
ເທວະດາ ແມ່ນຂ້ານ້ອຍທັງຫຼາຍກໍຕ້ອງການຈະເຫັນອຸປາສົກນັ້ນ
ທີ່ທ່ານມາທີ່ນີ້ເພື່ອຊ່ວຍເຫຼືອ ອຸປາສົກທີ່ທ່ານມັກ ເປັນຄົນໂຊກດີ

(ເທບພະບຸດຕອບວ່າ)

[໑໔໗໓] ຜູ້ໃດເປັນຊ່າງຕັດຜົມ ມີຊື່ວ່າ ສຳພະວະ ອາໄສການຕັດຜົມລ້ຽງຊີບ
ເຂົາເປັນຄົນຮັບໃຊ້ຂອງພວກທ່ານ
ທ່ານທັງຫຼາຍຈຶ່ງຮູ້ວ່າຜູ້ນັ້ນເປັນອຸປາສົກ
ທ່ານທັງຫຼາຍຢ່າໄດ້ດູໝິ່ນເຂົາ ເຂົາເປັນຜູ້ມີສິນເປັນທີ່ຮັກຍິ່ງ

(ພວກພໍ່ຄ້າກ່າວວ່າ)

[໑໘໗໔] ເທວະດາ ພວກຂ້ານ້ອຍຮູ້ຈັກຊ່າງຕັດຜົມຄົນທີ່ທ່ານເວົ້າເຖິງດີ
ແຕ່ບໍ່ຮູ້ວ່າເຂົາເປັນຄົນແນວນີ້ເລີຍ
ເທວະດາ ແມ່ນພວກເຮົາຟັງຄຳຂອງທ່ານແລ້ວ
ກໍຈັກບູຊາອຸປາສົກນັ້ນຢ່າງມະໂຫລານ

(ເທບພະບຸດກ່າວວ່າ)

[໑໘໗໕] ພວກຜູ້ຄົນໃນກອງກວຽນນີ້ ບໍ່ວ່າຄົນໜຸ່ມ ຄົນແກ່
ຫຼືຄົນປູນກາງ ທຸກຄົນນັ້ນແລເຊີນຂຶ້ນວິມານ
ພວກຄົນຂີ້ຖີ່ຈົ່ງເບິ່ງຜົນຂອງບຸນທັງຫຼາຍ

(ພຣະທຳສັງຄີຕິກາຈານກ່າວ ໖ ຄາຖາໃນຕອນຈົບເລື້ອງວ່າ)

[໑໘໗໖] ພໍ່ຄ້າທຸກຄົນ ໃນບ່ອນນັ້ນຕ່າງຄົນຕ່າງເຂົ້າຫ້ອມລ້ອມຊ່າງຕັດຜົມນັ້ນ
ພາກັນຂຶ້ນວິມານເຊິ່ງເໝືອນພິບຕາວະຕິງສາຂອງທ້າວວາສະວະ
ພ້ອມກັບກ່າວວ່າເຮົາກ່ອນ ໆ

[໑໘໗໗] ພໍ່ຄ້າທຸກຄົນນັ້ນຕ່າງກໍປະກາດຄວາມເປັນອຸປາສົກ ໃນບ່ອນນັ້ນວ່າ
ເຮົາກ່ອນ ໆ ແລ້ວໄດ້ເປັນຜູ້ງົດເວັ້ນຈາກການຂ້າສັດ
ເວັ້ນຂາດຈາກການຖືເອົາສິ່ງຂອງທີ່ເຂົາບໍ່ໄດ້ໃຫ້ໃນໂລກ
ຍິນດີສະເພາະພັນລະຍາຂອງຕົນ
ບໍ່ກ່າວຕົວະ ບໍ່ດື່ມນ້ຳເມົາ

[໑໘໗໘] ພໍ່ຄ້າທຸກຄົນນັ້ນເມື່ອປະກາດຄວາມເປັນອຸປາສົກ ໃນບ່ອນນັ້ນແລ້ວ
ໄດ້ໄປສູ່ປະເທດທີ່ຕົນປາຖະໜາໂດຍໂດຍປອດໄພ
ໝູ່ພໍ່ຄ້າກວຽນບັນເທີງຢູ່ດ້ວຍລິດຂອງເທວະດາເນືອງ ໆ
ໄດ້ຮັບອະນຸຍາດແລ້ວຫຼີກໄປ

[໑໘໗໙] ພໍ່ຄ້າເຫຼົ່ານັ້ນຕ້ອງການຊັບ ຫວັງກຳໄລ
ໄປເຖິງສິນທຸແລະໂສວີຣະປະເທດ
ພະຍາຍາມຄ້າຂາຍຕາມທີ່ຕັ້ງໃຈໄວ້
ມີລາບບໍລິບູນ ກັບມາເມືອງປາຕະລີບຸດໂດຍປອດໄພ

[໑໘໘໐] ພໍ່ຄ້າເຫຼົ່ານັ້ນໄປເຮືອນຂອງຕົນ
ມີຄວາມປອດໄພ ພ້ອມໜ້າບຸດພັນລະຍາ

ມີຈິດເພີດເພີນ ດີໃຈ ຍິນດີ
ທຳການບູຊາເສຣີດສະກະເທບພະບຸດຢ່າງມະໂຫລານ
ໄດ້ຊ່ອຍກັນສ້າງເຫວາໄລຊີ່ເສຣີດສະກະຂຶ້ນ

[໑໘໗໑] ການຄົບສັດຕະບຸຣຸດໃຫ້ສຳເລັດປະໂຫຍດແນວນີ້
ການຄົບຜູ້ມີຄຸນນະທຳມີປະໂຫຍດຫຼາຍ
ພໍ່ຄ້າທັງໝົດໄດ້ປະສົບຄວາມສຸກ
ຍ້ອນຜົນອັນສືບເນື່ອງມາຈາກອຸປາສົກຄົນດຽວ

**ເສຣີດສະກະວິມານທີ ໑໐ ຈົບ**

## ໑໑. ສຸປົກຂິດຕະວິມານ

## ວ່າດ້ວຍວິມານທີ່ເກີດຂຶ້ນແກ່ອຸປາສົກ ຜູ້ຈັດດອກໄມ້ໃຫ້ເປັນລະບຽບຢູ່ໜ້າສະຖູບ

(ພຣະມະຫາໂມກຄັນລານະເຖຣະຖາມເທບພະບຸດອົງໜຶ່ງວ່າ)

[໑໘໗໘] ວິມານມີເສົາເຮັດດ້ວຍແກ້ວມະນີນີ້ສູງຫຼາຍ ວັດໂດຍຮອບໄດ້ ໑໒ ໂຍດ
ເປັນຜາສາດ ໗໐໐ ຍອດ ເບິ່ງໂອລານ ມີເສົາປະດັບດ້ວຍແກ້ວໄພທູນ
ມີພື້ນປູລາດດ້ວຍແຜ່ນຄຳສວຍງາມ

[໑໘໗໙] ທ່ານສະຖິດ ດື່ມ ກິນຢູ່ໃນວິມານນັ້ນ
ມີຫວຍເທບພາກັນມາບັນເລງພິນທິບດັງມ່ວນ
ໃນວິມານຂອງທ່ານນີ້ມີປັນຈະກາມະຄຸນອັນເປັນທິບຣົດ
ແລະເຫຼົ່າເທບນາຣີຜູ້ປະດັບດ້ວຍອາພອນຄຳຟ້ອນລຳຢູ່

[໑໘໗໔] ຍ້ອນບຸນອັນໃດທ່ານຈຶ່ງມີຜິວພັນງາມແນວນີ້
ຜົນອັນເພິ່ງປາຖະໜາຈຶ່ງສຳເລັດແກ່ທ່ານໃນວິມານນີ້
ແລະໂພຄະທັງມວນລ້ວນໜ້າພໍໃຈ ຈຶ່ງເກີດຂຶ້ນແກ່ທ່ານ

[໑໘໗໕] ເທວະດາຜູ້ມີອານຸພາບຫຼາຍ ອາດຕະມາຂໍຖາມວ່າ
ເມື່ອທ່ານເກີດເປັນມະນຸດໄດ້ເຮັດບຸນອັນໃດໄວ້
ຍ້ອນບຸນອັນໃດທ່ານຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

[໑໔໘໖] ເທບພະບຸດນັ້ນດີໃຈທີ່ພຣະມະຫາໂມກຄັນລານະເຖຣະຖາມ
ຈຶ່ງຕອບບັນຫາຜົນກຳໄປຕາມທີ່ພຣະເຖຣະຖາມວ່າ

[໑໔໘໗] ຂ້ານ້ອຍໄດ້ຈັດດອກໄມ້ທີ່ເຂົາວາງໄວ້ບໍ່ຮຽບຮ້ອຍໃຫ້ຮຽບຮ້ອຍ
ແລ້ວໄດ້ວາງໄວ້ທີ່ພຣະສະຖູບຂອງພຣະສຸຄົດເຈົ້າໆ
ຈຶ່ງເປັນຜູ້ມີລິດຫຼາຍ ມີອານຸພາບຫຼາຍ
ພັ່ງພ້ອມດ້ວຍກາມມະຄຸນທິບ

[໑໔໘໘] ຍ້ອນບຸນນັ້ນຂ້ານ້ອຍຈຶ່ງມີຜິວພັນງາມແນວນີ້
ຜົນອັນເພິ່ງປາຖະໜາຈຶ່ງສຳເລັດແກ່ຂ້ານ້ອຍໃນວິມານນີ້
ແລະໂພຄະທັງມວນລ້ວນໜ້າພໍໃຈຈຶ່ງເກີດຂຶ້ນແກ່ຂ້ານ້ອຍ

[໑໔໘໙] ຂ້າແດ່ພິກຂຸຜູ້ມີອານຸພາບຫຼາຍ ຂ້ານ້ອຍຂໍຂາບຮຽນວ່າ
ຍ້ອນບຸນທີ່ໄດ້ເຮັດໄວ້ສະໄໝເມື່ອເກີດເປັນມະນຸດ
ຂ້ານ້ອຍຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

**ສຸນິກຂິດຕະວິມານທີ ໑໑ ຈົບ**

**ສຸນິກຂິດຕະວັກທີ ໗ ຈົບ**

## ລວມເລື້ອງວິມານທີ່ມີໃນວັກນີ້ ຄື

໑. ຈິດຕະລະຕາວິມານ
໒. ນະນິຖູນະວິມານ
໓. ອຳພະວິມານ
໗. ກັນຖະກະວິມານ
໙. ມັດຖະກຸນທະລີວິມານ
໑໑. ສຸນິກຂິດຕະວິມານ
໔. ນັນທະນະວິມານ
໔. ສຸວັນນະວິມານ
໖. ໂຄປາລະວິມານ
໘. ອະເນກະວັນນະວິມານ
໑໐. ເສຣິດສະກະວິມານ

**ພານະວານທີ ໔ ຈົບ**

**ວິມານວັດຖຸ ຈົບ**

# ພຣະສູດຕັນຕະປະດົກ

## ຂຸດທະກະນິກາຍ ເປຕະວັດຖຸ

**ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສໍາມາສໍາພຸດທະເຈົ້າ ພຣະອົງນັ້ນ**

## ໑. ອຸຣະຄະວັກ

### ໝວດວ່າດ້ວຍອຸປະມາດ້ວຍງູລອກຄາບ

## ໑. ເຂດຕູປະມະເປຕະວັດຖຸ

### ເລື້ອງພຣະອະຣະຫັນປຽບຄືນາຍ່ອມມີອຸປະກາຣະແກ່ເຜດແລະທາຍົກ

(ພຣະຜູ້ມີພຣະພາກເຈົ້າໄດ້ຕັດພຣະຄາຖາເຫຼົ່ານີ້ວ່າ)

[໑] ພຣະອະຣະຫັນທັງຫຼາຍປຽບຄືນາ
ທາຍົກທັງຫຼາຍປຽບຄືຊາວນາ
ວັດຖຸທານປຽບຄືພືດ
ຜົນທານຍ່ອມເກີດຈາກການທີ່ທາຍົກບໍລິຈາກວັດຖຸທານແກ່ປະຕິຄາຫົກ

[໒] ເຫດ ໓ ຢ່າງນີ້ ຄື ພືດ ການຫວ່ານ ນາ
ຍ່ອມມີອຸປະກາຣະແກ່ພວກເຜດແລະທາຍົກ
ເຜດທັງຫຼາຍຍ່ອມບໍຣິໂພກຜົນນັ້ນ
ທາຍົກຍ່ອມຈະເລີນດ້ວຍບຸນ

[໓] ທາຍົກເຮັດກຸສົນໃນອັດຕະພາບນີ້ແລ້ວອຸທິດໃຫ້ພວກເຜດ
ເມື່ອເຮັດກໍາດີແລ້ວຍ່ອມໄປສະຫວັນ

**ເຂດຕູປະມະເປຕະວັດຖຸທີ ໑ ຈົບ**

## ໒. ສູກະຣະມຸຂະເປຕະວັດຖຸ

### ເລື້ອງເຜດປາກໝູ

(ທ່ານພຣະນາຣະທະເຖຣະຖາມເຜດຕົນໜຶ່ງວ່າ)

[໔] ທົ່ວທັງກາຍຂອງທ່ານມີສີຄືຄຳ
ເປ່ງຣັດສະໝີສະຫວ່າງສະໄຫວໄປທົ່ວທຸກທິດ
ແຕ່ປາກຂອງທ່ານຄືປາກໝູ
ແຕ່ກ່ອນທ່ານໄດ້ເຮັດກຳອັນໃດໄວ້
(ເຜດນັ້ນຕອບວ່າ)

[໕] ທ່ານພຣະນາຣະທະ ແຕ່ກ່ອນຂ້ານ້ອຍໄດ້ສັງລວມກາຍ
ແຕ່ບໍ່ໄດ້ສັງລວມວາຈາ
ຍ້ອນເຫດນັ້ນ ຂ້ານ້ອຍຈຶ່ງມີຮູບຮ່າງແລະຜິວພັນ
ຕາມທີ່ທ່ານເຫັນຢູ່ນັ້ນ

[໖] ທ່ານນາຣະທະ ຍ້ອນເຫດນັ້ນ ຂ້ານ້ອຍຂໍບອກທ່ານ
ສະຣີຣະຂອງຂ້ານ້ອຍນີ້ທ່ານເຫັນເອງແລ້ວ
ທ່ານຢ່າໄດ້ເຮັດບາບດ້ວຍປາກ
ທ່ານຢ່າໄດ້ມີປາກຄືໝູເລີຍ

**ສູກະຣະເປຕະວັດຖຸທີ ໘ ຈົບ**

## ໓. ປູຕິມຸຂະເປຕະວັດຖຸ

## ເລື້ອງເຜດປາກເນົ່າ

(ທ່ານພຣະນາຣະທະຖາມເຜດຕົນໜຶ່ງວ່າ)

[໗] ທ່ານມີຜິວພັນງາມດັ່ງທິບ ຢືນຢູ່ໃນກາງອາກາດ
ແຕ່ປາກຂອງທ່ານມີກິ່ນເໝັນ
ໝູ່ໜອນພາກັນຊອນໄຊ ແຕ່ກ່ອນທ່ານໄດ້ເຮັດກຳອັນໃດໄວ້

(ເຜດນັ້ນຕອບວ່າ)

[໘] ແຕ່ກ່ອນ ຂ້ານ້ອຍເປັນສະມະນະລາມົກ ມີວາຈາຊົ່ວຫຍາບ
ມີປົກກະຕິສັງລວມກາຍ ແຕ່ບໍ່ສັງລວມປາກ
ຈຶ່ງໄດ້ມີຜິວພັນດັ່ງຄຳຍ້ອນຄວາມສັງລວມກາຍ
ແຕ່ປາກຂອງຂ້ານ້ອຍເໝັນເນົ່າຍ້ອນເວົ້າສັບສໍ່

[໗] ທ່ານນາຣະທະ ຮູບຮ່າງຂອງຂ້ານ້ອຍທ່ານເຫັນເອງແລ້ວ
ທ່ານຜູ້ສະຫຼາດເຊິ່ງເປັນຜູ້ອະນຸເຄາະກ່າວໄວ້ວ່າ
ທ່ານຢ່າໄດ້ເວົ້າສັບສໍ່ ແລະຢ່າໄດ້ເວົ້າມຸສາ
ທ່ານຈັກເປັນເທບຜູ້ສົມບູນດ້ວຍສົມບັດທີ່ໜ້າປາຖະໜາ

**ປູຕິມຸຂະເປຕະວັດຖຸທີ ໓ ຈົບ**

## ໔. ປິດຖະທິຕະລິກະເປຕະວັດຖຸ
## ເລື້ອງເຜດຕຸ໊ກຕາແປ້ງ

(ພຣະຜູ້ມີພຣະພາກເຈົ້າໄດ້ຕັດວ່າ)

[໑໐] ບຸກຄົນຜູ້ບໍ່ຂີ້ຖີ່ ຄວນເຮັດເຫດແນວໃດແນວໜຶ່ງໃຫ້ເປັນອາລົມ
ຄື ຜາຣົບບຸຣະພະຊົນຜູ້ລ່ວງລັບໄປແລ້ວ ຫຼືເທວະດາຜູ້ສິງຢູ່ໃນເຮືອນ

[໑໑] ຫຼືທ້າວມະຫາຣາດທັງ ໔ ຜູ້ຮັກສາໂລກ ມີບໍລິວານຍົດ
ຄື ທ້າວກຸເວນ ທ້າວທະຕະຣະຖະ ທ້າວວິຣູປັກ
ແລະທ້າວວິຣູນຫົກ ແລ້ວເພິ່ງຖວາຍທານ
ທ່ານເຫຼົ່ານັ້ນເປັນຜູ້ອັນບຸກຄົນບູຊາແລ້ວ ແລະທາຍົກກໍບໍ່ຂາດຜົນ

[໑໒] ການຮ້ອງໄຫ້ ຄວາມໂສກເສົ້າ ຫຼືຄວາມຮ້ອງໄຫ້
ຮ່ຳໄຮແນວອື່ນໃດ ບໍ່ຄວນເຮັດເລີຍ
ຍ້ອນການຮ້ອງໄຫ້ເປັນຕົ້ນນັ້ນບໍ່ເປັນປະໂຫຍດແກ່ຜູ້ທີ່ລ່ວງລັບໄປແລ້ວ
ຍາດທັງຫຼາຍກໍຍັງຄົງສະພາບຢູ່ຢ່າງນັ້ນ

[໑໓] ສ່ວນທັກຂິນາທານນີ້ແລ ທີ່ຕັ້ງໄວ້ດີແລ້ວໃນສົງ
ຍ່ອມສຳເລັດປະໂຫຍດເກື້ອກູນແກ່ເຜດນັ້ນໂດຍທັນທີ ສິ້ນການລະນານ

**ປິດຖະທິຕະລິກະເປຕະວັດຖຸທີ ໔ ຈົບ**

## ໕. ຕິໂຣກຸດທະເປຕະວັດຖຸ[១]
## ເລື້ອງເຜດຢູ່ນອກຝາເຮືອນ

[໑໔] ພວກເຜດພາກັນມາສູ່ເຮືອນຂອງຕົນ
ລາງພວກຢືນຢູ່ທີ່ຝາເຮືອນດ້ານນອກ

ລາງພວກຢືນຢູ່ທີ່ທາງສີ່ແຍກສາມແຍກ
ລາງພວກຢືນອີງຢູ່ທີ່ບານປະຕູ

[໑໕] ເມື່ອມີເຂົ້າແລະນ້ຳດື່ມຫຼວງຫຼາຍ
ເມື່ອຂອງຫຍ້ຳຂອງກິນຖືກຈັດກຽມໄວ້ແລ້ວ
ຍາດຈັກຄົນກໍບໍ່ນຶກເຖິງເຜດເຫຼົ່ານັ້ນ
ຍ້ອນກຳຂອງສັດທັງຫຼາຍເປັນປັດໄຈ

[໑໖] ເຫຼົ່າຊົນຜູ້ອະນຸເຄາະ
ຍ່ອມໃຫ້ອາຫານແລະນ້ຳດື່ມທີ່ສະອາດປະນີດ
ເໝາະແກ່ພຣະສົງຕາມການ
ອຸທິດໃຫ້ຍາດທັງຫຼາຍ(ທີ່ເກີດເປັນເຜດ)ແບບນີ້ວ່າ
ຂໍທານນີ້ຈົ່ງສຳເລັດແກ່ຍາດທັງຫຼາຍ
ຂໍຍາດທັງຫຼາຍຈົ່ງເປັນສຸກເທີ້ນ

[໑໗] ສ່ວນຍາດທີ່ເກີດເປັນເຜດເຫຼົ່ານັ້ນ
ພາກັນມາປະຊຸມພ້ອມກັນ ຢູ່ບ່ອນທີ່ໃຫ້ທານນັ້ນ
ຍ່ອມອະນຸໂມທະນາໃນອາຫານແລະນ້ຳດື່ມຫຼວງຫຼາຍ ໂດຍເຄົາລົບວ່າ

[໑໘] ຍ້ອນເຫດແຫ່ງຍາດເຫຼົ່າໃດພວກເຮົາຈຶ່ງໄດ້ສົມບັດແບບນີ້
ຂໍຍາດເຫຼົ່ານັ້ນຂອງພວກເຮົາຈົ່ງມີອາຍຸຍືນ
ອັນໜຶ່ງ ການບູຊາຍາດຜູ້ເປັນທາຍົກກໍໄດ້ເຮັດແກ່ພວກເຮົາແລ້ວ
ແລະທາຍົກກໍບໍ່ຂາດຜົນ

[໑໙] ກໍໃນເປຕະວິໄສນັ້ນ ບໍ່ມີກະສິກຳ(ການເຮັດໄຮ່ໄຖນາ)
ບໍ່ມີໂຄຣັກຂະກຳ(ການລ້ຽງງົວໄວ້ຂາຍ)
ບໍ່ມີພານິດຊະກຳ(ການຄ້າຂາຍ)ເຊັ່ນນັ້ນ
ການແລກປ່ຽນຊື້ຂາຍດ້ວຍເງິນກໍບໍ່ມີ
ຜູ້ທີ່ຕາຍໄປເປັນເຜດໃນເປຕະວິໄສນັ້ນ
ດຳລົງຊີບຢູ່ດ້ວຍຜົນທານທີ່ພວກຍາດອຸທິດໃຫ້ຈາກມະນຸດສາໂລກນີ້

[໒໐] ນ້ຳຝົນຕົກລົງມາໃນບ່ອນໂນນຍ່ອມໄຫຼໄປສູ່ບ່ອນຫຼຸບສັນໃດ
ທານທີ່ທາຍົກອຸທິດໃຫ້ຈາກມະນຸດສາໂລກນີ້
ຍ່ອມສຳເລັດຜົນແນ່ນອນແກ່ເຜດທັງຫຼາຍຄືກັນສັນນັ້ນ

[໔໑] ແມ່ນ້ຳທີ່ເຕັມຍ່ອມຍັງສະມຸດສາຄອນໃຫ້ເຕັມປ່ຽມສັນໃດ
ທານທີ່ທາຍົກອຸທິດໃຫ້ຈາກມະນຸດສາໂລກນີ້
ຍ່ອມສຳເລັດແກ່ເຜດທັງຫຼາຍຄືກັນສັນນັ້ນ

[໔໒] ກຸນລະບຸດເມື່ອຣະນຶກເຖິງອຸປະກາຣະທີ່ຍາດ
ຜູ້ລະໄປແລ້ວເຮັດໄວ້ໃນການກ່ອນວ່າ
ຜູ້ນັ້ນໄດ້ໃຫ້ສິ່ງນີ້ແກ່ເຮົາ ໄດ້ເຮັດສິ່ງນີ້ແກ່ເຮົາ
ໄດ້ເປັນຍາດ ມິດ ແລະສະຫາຍຂອງເຮົາ
ກໍຄວນຖວາຍທັກຂິນາທານອຸທິດໃຫ້ແກ່ຍາດຜູ້ລະໄປແລ້ວ

[໔໓] ການຮ້ອງໄຫ້ ຄວາມໂສກເສົ້າ
ຫຼືຄວາມຮ້ອງໄຫ້ຮ່ຳໄຮແບບອື່ນໃດ
ໃຜ ໆ ບໍ່ຄວນເຮັດເລີຍ ຍ້ອນການຮ້ອງໄຫ້ເປັນຕົ້ນນັ້ນ
ບໍ່ເປັນປະໂຫຍດແກ່ຜູ້ທີ່ລ່ວງລັບໄປແລ້ວ
ຍາດທັງຫຼາຍກໍຍັງຄົງສະພາບຢູ່ຢ່າງນັ້ນ

[໔໔] ສ່ວນທັກຂິນາທານນີ້ແລທີ່ຕັ້ງໄວ້ດີແລ້ວໃນພຣະສົງ
ຍ່ອມສຳເລັດປະໂຫຍດເກື້ອກູນແກ່ເຜດນັ້ນໂດຍທັນທີສິ້ນການລະນານ

[໔໕] ຍາດທຳ^໑^ນີ້ນັ້ນທ່ານສະແດງອອກແລ້ວ
ການບູຊາຍາດທີ່ຕາຍໄປທ່ານເຮັດຢ່າງຍິ່ງໃຫຍ່ແລ້ວ
ທັງກຳລັງກາຍຂອງພິກຂຸທ່ານກໍເພີ່ມໃຫ້ແລ້ວ
ເປັນອັນວ່າທ່ານສະສົມບຸນໄວ້ບໍ່ແມ່ນໜ້ອຍເລີຍ

**ຕິໂຣກຸດທະເປຕະວັດຖຸທີ ໕ ຈົບ**

## ໖. ປັນຈະປຸດຕະຂາທິກະເປຕິວັດຖຸ
## ເລື່ອງນາງເຜດກິນລູກເວລາລະ ໕ ຕົນ

(ພຣະສັງຄະເຖຣະຖາມວ່າ)

[໔໖] ທ່ານເປືອຍກາຍ ມີຜິວພັນແລະຮູບຮ່າງໜ້າກຽດຊັງເປັນຕາຍ້ານ
ມີກິ່ນເໝັນເນົ່າຟຸ້ງໄປ
ໝູ່ແມງວັນພາກັນໄຕ່ຕອມຍຸບ ໆ ຢູ່
ທ່ານເປັນໃຜກັນນໍມາຢືນຢູ່ໃນບ່ອນນີ້

(ນາງເຜດນັ້ນຕອບວ່າ)

[໔໗] ທ່ານຜູ້ຈະເລີນ ຂ້ານ້ອຍເກີດເປັນເຜດໃນຍົມມະໂລກ
ໄດ້ຮັບຄວາມລຳບາກ ຍ້ອນເຮັດກຳຊົ່ວໄວ້
ຈຶ່ງຕ້ອງຈາກໂລກນີ້ໄປສູ່ເປຕະໂລກ

[໔໘] ເວລາເຊົ້າ ຄອດລູກ ໕ ຄົນ ເວລາຄ່ຳອີກ ໕ ຄົນ
ແລ້ວກິນລູກເຫຼົ່ານັ້ນທັງໝົດ
ແຕ່ກໍຍັງບໍ່ອາດບັນເທົາຄວາມຫິວຂອງຂ້ານ້ອຍໄດ້

[໔໙] ຫົວໃຈຂອງຂ້ານ້ອຍຖືກຄວາມຫິວແຜດເຜົາສຸມຢູ່
ຂ້ານ້ອຍບໍ່ໄດ້ດື່ມນ້ຳທີ່ຄວນດື່ມ
ຂໍເຊີນທ່ານເບິ່ງຂ້ານ້ອຍເຊິ່ງເຖິງຄວາມພິນາດແນວນີ້ເທີ້ນ

(ພຣະເຖຣະຖາມວ່າ)

[໕໐] ແຕ່ກ່ອນ ທ່ານໄດ້ເຮັດກຳຊົ່ວທາງກາຍ ວາຈາ ໃຈອັນໃດໄວ້ນໍ
ຍ້ອນຜົນກຳອັນໃດທ່ານຈຶ່ງຕ້ອງກິນຊີ້ນລູກ
(ນາງເຜດນັ້ນຕອບວ່າ)

[໕໑] ແຕ່ກ່ອນ ຍິງຮ່ວມສາມີຂອງຂ້ານ້ອຍຄົນໜຶ່ງໄດ້ຖືພາ
ຂ້ານ້ອຍໄດ້ຄິດຮ້າຍຕໍ່ນາງ ມີໃຈປະທຸດສະຮ້າຍໄດ້ເຮັດໃຫ້ນາງລຸລູກ

[໕໒] ນາງຖືພາ ໒ ເດືອນທໍ່ນັ້ນກໍຕົກເລືອດ
ຄັ້ງນັ້ນ ມານດາຂອງນາງຄຽດແລ້ວເຊີນຍາດຂອງຂ້ານ້ອຍມາປະຊຸມໄຕ່ຖາມ
ໃຫ້ຂ້ານ້ອຍສາບານ ແລະຂູ່ເຂັນຂ້ານ້ອຍໃຫ້ຢ້ານ

[໕໓] ສ່ວນຂ້ານ້ອຍນັ້ນໄດ້ກ່າວຄຳສາບານຕົວະຢ່າງຮຸນແຮງວ່າ
ຖ້າເຮົາທຳຄວາມຊົ່ວແນວນີ້ຈິງ ຂໍໃຫ້ເຮົາກິນຊີ້ນລູກເທີ້ນ

[໕໔] ຍ້ອນຜົນກຳ ຄືການທຳລາຍສັດມີຊີວິດ
ແລະການກ່າວຕົວະທັງ ໒ ຢ່າງນັ້ນ
ຂ້ານ້ອຍຈຶ່ງມີກາຍເປື້ອນໜອງແລະເລືອດ ກິນຊີ້ນລູກ

**ປັນຈະປຸດຕະຂາທິກະປະເປຕິວັດຖຸທີ່ ໙ ຈົບ**

# ໗. ສັດຕະປຸດຕະຂາທິກະເປຕິວັດຖຸ

## ເລື້ອງນາງເຜດກິນລູກເວລາລະ ໗ ຕົນ

(ພຣະມະຫາເຖຣະຖາມນາງເຜດຕົນໜຶ່ງວ່າ)

[໓໕] ທ່ານເປືອຍກາຍ ມີຜິວພັນແລະຮູບຮ່າງໜ້າກຽດຊັງເປັນຕາຢ້ານ
ມີກິ່ນເໝັນເນົ່າຟຸ້ງໄປ ໝູ່ແມງວັນພາກັນໄຕ່ຕອມຍຸບ ໆ ຢູ່
ທ່ານເປັນໃຜກັນນໍມາຢືນຢູ່ໃນບ່ອນນີ້
(ນາງເຜດນັ້ນຕອບວ່າ)

[໓໖] ທ່ານຜູ້ຈະເລີນ ຂ້ານ້ອຍເກີດເປັນເຜດໃນຍົມມະໂລກ
ໄດ້ຮັບຄວາມລຳບາກ ຍ້ອນເຮັດກຳຊົ່ວໄວ້
ຈຶ່ງຕ້ອງຈາກໂລກນີ້ໄປສູ່ເປຕະໂລກ

[໓໗] ເວລາເຊົ້າ ຄອດລູກ ໗ ຄົນ ເວລາຄ່ຳອີກ ໗ ຄົນ
ແລ້ວກິນລູກເຫຼົ່ານັ້ນທັງໝົດ
ແຕ່ກໍຍັງບໍ່ອາດບັນເທົາຄວາມຫິວຂອງຂ້ານ້ອຍໄດ້

[໓໘] ຫົວໃຈຂອງຂ້ານ້ອຍຖືກຄວາມຫິວແຜດເຜົາສຸມຢູ່
ຂ້ານ້ອຍເປັນດັ່ງຖືກໄຟເຜົາໃນບ່ອນອັນຮ້ອນຍິ່ງ
ບໍ່ໄດ້ປະສົບຄວາມເຢັນເລີຍ
(ພຣະເຖຣະຖາມວ່າ)

[໓໙] ແຕ່ກ່ອນທ່ານໄດ້ເຮັດກຳຊົ່ວທາງກາຍ ວາຈາ ໃຈອັນໃດໄວ້ນໍ
ຍ້ອນຜົນກຳອັນໃດທ່ານຈຶ່ງຕ້ອງກິນຊີ້ນລູກ

(ນາງເຜດນັ້ນຕອບວ່າ)

[໔໐] ແຕ່ກ່ອນຂ້ານ້ອຍມີລູກ ໒ ຄົນ ລູກ ໒ ຄົນນັ້ນກຳລັງໜຸ່ມແໜ້ນ
ຂ້ານ້ອຍນັ້ນປະກອບດ້ວຍກຳລັງຄືລູກ[១] ຈຶ່ງດູໝິ່ນສາມີຂອງຕົນ

[໔໑] ພາຍຫຼັງສາມີໂກດຂ້ານ້ອຍ ຈຶ່ງໄດ້ຫາພັນຍາມາອີກ
ແລະພັນລະຍາໃໝ່ນັ້ນຖືພາ ຂ້ານ້ອຍໄດ້ຄິດຮ້າຍຕໍ່ນາງ

[໔໒] ມີໃຈປະທຸດສະຮ້າຍໄດ້ເຮັດໃຫ້ນາງລຸລູກ

ພັນລະຍາໃໝ່ນັ້ນຖືພາ ໓ ເດືອນທໍ່ນັ້ນ ກໍຕົກເລືອດ

[໔໓] ຄັ້ງນັ້ນ ມານດາຂອງນາງຄຽດແລ້ວ
ເຊີນພວກຍາດຂອງຂ້ານ້ອຍມາປະຊຸມໄຕ່ຖາມ
ໃຫ້ຂ້ານ້ອຍສາບານ ແລະຂູ່ເຂັນຂ້ານ້ອຍໃຫ້ຢ້ານ

[໔໔] ສ່ວນຂ້ານ້ອຍນັ້ນໄດ້ກ່າວຄໍາສາບານຕົວະຢ່າງຮຸນແຮງວ່າ
ຖ້າເຮົາທໍາຄວາມຊົ່ວແບວນີ້ຈິງ ຂໍໃຫ້ເຮົາກິນຊີ້ນລູກເທີ້ນ

[໔໕] ຍ້ອນຜົນກໍາຄືການທໍາລາຍສັດມີຊີວິດ
ແລະການກ່າວຕົວະທັງ ໒ ຢ່າງນັ້ນ
ຂ້ານ້ອຍຈຶ່ງມີກາຍເປື້ອນໜອງແລະເລືອດ ກິນຊີ້ນລູກ

**ສັດຕະປຸດຕະຂາທິກະdເປຕິວັດຖຸທີ ໗ ຈົບ**

## ໘. ໂຄນະເປຕະວັດຖຸ

## ເລື້ອງລູກສອນພໍ່ດ້ວຍງົວທີ່ຕາຍແລ້ວ

(ກຸດຸມພີຜູ້ເປັນບິດາຖາມສຸຊາດກຸມານວ່າ)

[໔໖] ເຈົ້າເປັນບ້າໄປແລ້ວບໍ ຈຶ່ງກ່ຽວຫຍ້າສົດ
ແລ້ວເພີ້ຮ້ອງຮຽກງົວແກ່ເຊິ່ງຕາຍແລ້ວວ່າ ຈົ່ງກິນ ຈົ່ງກິນ

[໔໗] ງົວຕາຍແລ້ວ ລຸກຂຶ້ນກິນຫຍ້າແລະນໍ້າບໍ່ໄດ້ດອກ
ເຈົ້າເປັນຄົນໂງ່ຈ້ໍາເປົາປັນຍາຄືຄົນໂງ່ອື່ນ ໆ

**(ສຸຊາດກຸມານກ່າວວ່າ)**

[໔໘] ງົວໂຕນີ້ຍັງມີຕີນຄົບທັງ ໔ ຕີນ
ມີຫົວ ມີໂຕ ພ້ອມທັງຫາງແລະໜ່ວຍຕາຄົງຢູ່ຄືເກົ່າ
ຍ້ອນເຫດນີ້ ລູກຈຶ່ງຄິດວ່າ ງົວໂຕນີ້ເພິ່ງລຸກຂຶ້ນ

[໔໙] ສ່ວນປູ່ບໍ່ຜາກົດກະທັ່ງມື ຕີນ ກາຍ ແລະຫົວ
ພໍ່ມາຮ້ອງໄຫ້ເຖິງກະດູກຂອງປູ່ທີ່ບັນຈຸໄວ້ໃນສະຖູບດິນ
ຈະບໍ່ເປັນຄົນໂງ່ບໍ

(ກຸດຸມພີຟັງຄຳນັ້ນແລ້ວຈຶ່ງກ່າວສັນເສີນສຸຊາດກຸມານວ່າ)

[໕໐] ເຈົ້າຊ່ອຍຫົດເຮົາຜູ້ຮ້ອນຮົນໃຫ້ສະງົບ
ດັບຄວາມກະວົນກະວາຍທັງໝົດ
ຄືຄົນໃຊ້ນ້ຳຫົດມອດໄຟທີ່ໄໝ້ໄຂງົວ

[໕໑] ເຈົ້າໄດ້ບັນເທົາຄວາມໂສກເສົ້າເຖິງບິດາຂອງເຮົາຜູ້ກຳລັງເສົ້າໂສກ
ຊື່ວ່າ ໄດ້ຊ່ອຍຖອນລູກສອນຄືຄວາມໂສກ
ເຊິ່ງສຽບຫະໄທຂອງເຮົາອອກໄດ້ແລ້ວນໍ

[໕໒] ມານົບ ເຮົາເຊິ່ງເຈົ້າຊ່ອຍຖອນລູກສອນຄືຄວາມໂສກອອກໄດ້ແລ້ວ
ກໍເຢັນສະງົບແລ້ວ
ຈະບໍ່ເສົ້າໂສກ ບໍ່ຮ້ອງໄຫ້ ຍ້ອນໄດ້ຟັງຄຳຂອງເຈົ້າ

[໕໓] ຊົນເຫຼົ່າໃດເປັນຜູ້ອະນຸເຄາະມານດາບິດາ
ຊົນເຫຼົ່ານັ້ນເປັນຄົນມີປັນຍາຍ່ອມເຮັດແນວນີ້
ຍ່ອມຊ່ອຍມານດາບິດາໃຫ້ຫາຍຈາກຄວາມໂສກເສົ້າ
ຄືສຸຊາດກຸມານຊ່ອຍມານດາບິດາໃຫ້ຫາຍຈາກຄວາມໂສກເສົ້າໄດ້

**ໂຄນະເປຕະວັດຖຸທີ ໗ ຈົບ**

## ໘. ມະຫາເປສະກາຣະເປຕິວັດຖຸ
## ເລື້ອງນາງເຜດອະດີດພັນລະຍາຫົວໜ້າຊ່າງຫູກ

(ພິກຊຸອົງໜຶ່ງຖາມເທບພະບຸດອົງໜຶ່ງວ່າ)

[໕໔] ນາງເຜດນີ້ກິນຄູດ[១] ມູດ ໂລຫິດ ແລະໜອງ
ນີ້ເປັນວິບາກກຳອັນໃດ
ນາງເຜດຜູ້ທີ່ກິນເລືອດແລະໜອງເປັນປະຈຳ
ແຕ່ກ່ອນໄດ້ເຮັດກຳອັນໃດໄວ້

[໕໕] ຜ້າທັງຫຼາຍຍັງໃໝ່ ສວຍງາມ
ອ່ອນນຸ່ມ ບໍລິສຸດ ມີຂົນອ່ອນ
ທີ່ທ່ານໃຫ້ ຍ່ອມກາຍເປັນແຜ່ນເຫຼັກ
ແຕ່ກ່ອນນາງເຜດນີ້ໄດ້ເຮັດກຳອັນໃດໄວ້ນໍ

(ເທບພະບຸດຕອບວ່າ)

[໕໙] ແຕ່ກ່ອນນາງເຜດນີ້ເປັນພັນລະຍາຂອງຂ້ານ້ອຍ
ເປັນຄົນຂີ້ຖີ່ ກະດ້າງ ບໍ່ໃຫ້ທານ
ນາງໄດ້ດ່າແລະກ່າວໂທດຂ້ານ້ອຍ
ຜູ້ກຳລັງຖວາຍທານແກ່ສະມະນະພາມທັງຫຼາຍວ່າ

[໕໗] ເຈົ້າຈົ່ງກິນຄູດ ມູດ ເລືອດ ແລະໜອງ
ເຊິ່ງເປັນຂອງບໍ່ສະອາດທຸກເມື່ອ
ຄູດ ມູດ ເລືອດ ແລະໜອງຈົ່ງເປັນອາຫານຂອງເຈົ້າໃນໂລກໜ້າ
ແຜ່ນເຫຼັກຈົ່ງເປັນຜ້າຂອງເຈົ້າ
ຍ້ອນປະພຶດຊົ່ວແບບນີ້
ນາງມາໃນບ່ອນນີ້ ຈຶ່ງກິນແຕ່ຄູດແລະມູດເປັນຕົ້ນຕະຫຼອດການລະນານ

**ມະຫາເປສະກາຣະເປຕິວັດຖຸທີ ໗ ຈົບ**

## ໑໐. ຂັນລາຕິຍະເປຕິວັດຖຸ

## ເລື້ອງນາງເຜດຫົວລ້ານ

(ຫົວໜ້າພໍ່ຄ້າຖາມນາງເວມານິກະເຜດຕົນໜຶ່ງວ່າ)

[໕໘] ນາງເປັນໃຜກັນນໍ ຢູ່ແຕ່ພາຍໃນວິມານ
ບໍ່ອອກມາຂ້າງນອກເລີຍ
ນາງຜູ້ຈະເລີນ ເຊີນທ່ານອອກມາເທີ້ນ
ເຮົາຈະຂໍຊົມທ່ານຜູ້ມີລິດຫຼາຍ

(ນາງເວມານິກະເຜດຕອບວ່າ)

[໕໙] ເຮົາເປັນຍິງເປືອຍກາຍ ມີແຕ່ຜົມປົດບັງໄວ້
ກະດາກອາຍທີ່ຈະອອກໄປຂ້າງນອກ
ເຮົາໄດ້ເຮັດບຸນໄວ້ໜ້ອຍແທ້

(ຫົວໜ້າພໍ່ຄ້າກ່າວວ່າ)

[໖໐] ນາງຜູ້ມີຮູບງາມ ຖ້າຈັ່ງຊັ້ນແລ້ວ ເຮົາຈະໃຫ້ຜ້າເນື້ອດີແກ່ນາງ
ເຊີນນາງນຸ່ງຜ້ານີ້ ເມື່ອນຸ່ງຜ້ານີ້ສຳເລັດແລ້ວຈົ່ງອອກມາ

ຂໍເຊີນອອກມາພາຍນອກນະນາງຜູ້ຈະເລີນ
ເຮົາຈະຂໍຊົມທ່ານຜູ້ມີລິດຫຼາຍ

(ນາງເວມານິກະເຜດຕອບວ່າ)

[໖໑] ຜ້ານັ້ນເຖິງທ່ານຈະຈັບຍື່ນໃຫ້ທີ່ມືຂອງເຮົາເອງ
ກໍບໍ່ສຳເລັດແກ່ເຮົາ ຖ້າໃນໝູ່ຊົນນີ້ມີອຸປາສິກາຜູ້ມີສັດທາ
ເປັນສາວິກາຂອງພຣະສຳມາສຳພຸດທະເຈົ້າ

[໖໔] ຂໍທ່ານຈົ່ງໃຫ້ອຸປາສິການັ້ນນຸ່ງຫົ່ມຜ້າທີ່ທ່ານຈະໃຫ້ເຮົາ
ແລ້ວອຸທິດສ່ວນບຸນໃຫ້ເຮົາ ເມື່ອເຮັດແນວນັ້ນ
ເຮົາຈັກເຖິງຄວາມສຸກ ພຽບພ້ອມດ້ວຍສົມບັດຕາມປາຖະໜາທຸກຢ່າງ
(ພຣະສັງຄີຕິກາຈານທັງຫຼາຍກ່າວຄາຖາເຫຼົ່ານີ້ວ່າ)

[໖໓] ພໍ່ຄ້າເຫຼົ່ານັ້ນໃຫ້ອຸປາສິການັ້ນອາບນ້ຳ
ລູບທາດ້ວຍຂອງຫອມ ໃຫ້ນຸ່ງຫົ່ມຜ້າແລ້ວ
ອຸທິດສ່ວນບຸນໄປໃຫ້ນາງເວມານິກະເຜດນັ້ນ

[໖໔] ໃນລຳດັບທີ່ພວກພໍ່ຄ້າອຸທິດສ່ວນບຸນໃຫ້ນັ້ນເອງ
ວິບາກຄືອາຫານ ເຄື່ອງນຸ່ງຫົ່ມ ແລະນ້ຳດື່ມ
ກໍເກີດຂຶ້ນແກ່ນາງເວມານິກະເຜດນັ້ນ ນີ້ເປັນຜົນແຫ່ງທັກຂິນາ

[໖໕] ລຳດັບນັ້ນ ນາງມີຮ່າງກາຍມົດຈົດ ນຸ່ງຜ້າສະອາດ
ນຸ່ງຜ້າເນື້ອດີກວ່າຜ້າແຄວັ້ນກາສີ
ຍ່າງຍິ້ມອອກມາຈາກວິມານ ນີ້ເປັນຜົນແຫ່ງທັກຂິນາ

[໖໖] ອັນໜຶ່ງ ວິມານຂອງທ່ານງົດງາມ ມີຮູບພາບວິຈິດດີ ສະຫວ່າງສະໄຫວ
ນາງເທບທິດາ ພວກເຮົາຖາມແລ້ວ ຂໍທ່ານຈົ່ງບອກ
ນີ້ເປັນຜົນຂອງກຳອັນໃດ

(ເທບທິດານັ້ນຕອບວ່າ)

[໖໗] ເຮົາມີຈິດເຫຼື້ອມໃສດີແລ້ວ
ໄດ້ຖວາຍແປ້ງຂົ້ວໃສ່ນ້ຳມັນ
ແດ່ພິກຂຸຜູ້ປະຕິບັດກົງເຊິ່ງກຳລັງທ່ຽວພິກຂາຈານ

[໖໗] ເຮົາສະເຫວີຍວິບາກແຫ່ງກຸສົນກຳນັ້ນໃນວິມານ ສິ້ນການລະນານ
ແຕ່ດຽວນີ້ ຜົນບຸນນັ້ນເຫຼືອຢູ່ຈັກໜ້ອຍ

[໖໙] ພົ້ນຈາກ ໔ ເດືອນໄປແລ້ວ ເຮົາຈັກຕາຍ
ຈັກຕົກນະຣົກອັນຮ້ອນຮົນແສນສາຫັດ

[໗໐] ນະຣົກນັ້ນມີ ໔ ຫຼ່ຽມ ມີປະຕູ ໔ ດ້ານ
ກຳສ້າງຈຳແນກໄວ້ເປັນສ່ວນ ໆ
ອ້ອມຮອບດ້ວຍກຳແພງເຫຼັກ ຄອບໄວ້ດ້ວຍແຜ່ນເຫຼັກ

[໗໑] ພື້ນນະຣົກນັ້ນລ້ວນເປັນເຫຼັກແດງລຸກເປັນແປວເພີງ
ປະກອບດ້ວຍຄວາມຮ້ອນ
ແຜ່ໄປຮອບຕະຫຼອດຮ້ອຍໂຍດຢູ່ຕະຫຼອດການ

[໗໒] ເຮົາຈັກຕ້ອງສະເຫວີຍທຸກຂະເວທະນາໃນມະຫານະຣົກນັ້ນຍາວນານ
ດ້ວຍວ່າ ການສະເຫວີຍທຸກແນວນີ້ເປັນຜົນກຳຊົ່ວ
ຍ້ອນແນວນັ້ນ ເຮົາຈຶ່ງເສົ້າໂສກຢ່າງໜັກ

**ຂັນລາຕິຍະເປຕິວັດຖຸທີ ໑໐ ຈົບ**

# ໑໑. ນາຄະເປຕະວັດຖຸ

## ເລື້ອງເຜດຜູ້ຍ່າງຮ້ອງໄຫ້ຕາມພາຫະນະຊ້າງຂອງລູກຊາຍ

(ສາມະເນນຖາມພວກເຜດເຫຼົ່ານັ້ນວ່າ)

[໗໓] ຄົນໜຶ່ງຂີ່ຊ້າງເຜືອກໄປທາງໜ້າ
ຄົນໜຶ່ງຂີ່ລົດທຽມດ້ວຍແມ່ມ້າອັດສະດອນໄປທ່າມກາງ
ແລະສາວນ້ອຍຂຶ້ນວໍໄປທາງຫຼັງ
ເປ່ງຣັດສະໝີສະຫວ່າງສະໄຫວໄປທົ່ວທຸກທິດ

[໗໔] ສ່ວນພວກທ່ານຖືຄ້ອງຍ່າງຮ້ອງໄຫ້
ມີໜ້າຊຸ່ມດ້ວຍນ້ຳຕາ ມີຮ່າງກາຍແຕກເປັນບາດ
ສະໄໝເມື່ອເກີດເປັນມະນຸດພວກທ່ານໄດ້ເຮັດບາບອັນໃດໄວ້
ເຊິ່ງເປັນເຫດໃຫ້ພວກທ່ານດື່ມກິນໂລຫິດຂອງກັນແລະກັນ

(ເຜດທັງສອງໄດ້ຟັງສາມະເນນຖາມຈຶ່ງຕອບວ່າ)

[໗໔] ຜູ້ທີ່ຂີ່ຊ້າງເຜືອກຊາດກຸນຊອນ ໔ ຕີນໄປທາງໜ້າ
ເປັນບຸດຄົນໃຫຍ່ຂອງຂ້ານ້ອຍທັງສອງ
ເຂົາໄດ້ຖວາຍທານ ຈຶ່ງໄດ້ຮັບຄວາມສຸກ ບັນເທີງໃຈ

[໗໕] ຜູ້ທີ່ຂີ່ລົດທຽມດ້ວຍແມ່ມ້າອັດສະດອນ ໔ ໂຕ
ແລ່ນພຽງໄປໃນທ່າມກາງ ເປັນບຸດຄົນກາງຂອງຂ້ານ້ອຍທັງສອງ
ເປັນຄົນບໍ່ຂີ້ຖີ່ ເປັນທານະບໍດີ ຮຸ່ງເຮືອງຢູ່

[໗໗] ນາຣີຜູ້ມີປັນຍາ ມີດວງຕາມົນຢາດຍ້ອຍດັ່ງຕາເນື້ອ
ຂຶ້ນວໍມາທາງຫຼັງ ເປັນທິດາຄົນສຸດທ້ອງຂອງຂ້ານ້ອຍທັງສອງ
ນາງມີຄວາມສຸກເບີກບານໃຈ ຍ້ອນສ່ວນແຫ່ງທານເຄິ່ງສ່ວນ

[໗໘] ແຕ່ກ່ອນ ເຂົາທັງສາມມີຈິດເຫຼື້ອມໃສ
ໄດ້ຖວາຍທານແກ່ສະມະນະພາມທັງຫຼາຍ
ສ່ວນຂ້ານ້ອຍທັງສອງເປັນຄົນຂີ້ຖີ່ ກ່າວໂທດສະມະນະພາມທັງຫຼາຍ

ອັນໜຶ່ງ ເຂົາທັງສາມນີ້ຖວາຍທານແລ້ວໄດ້ຮັບການບໍາລຸງປົນເປີດ້ວຍກາມມະຄຸນ ອັນເປັນທິບ ສ່ວນຂ້ານ້ອຍທັງສອງຈ່ອຍເຫຼືອງຢູ່ດັ່ງໄມ້ອໍ້ທີ່ຖືກຕັດ

(ສາມະເນນຖາມວ່າ)

[໗໙] ອາຫານແລະບ່ອນນອນຂອງພວກທ່ານເປັນແນວໃດ
ອັນໜຶ່ງ ພວກທ່ານຜູ້ມີບາບໜາລ້ຽງອັດຕະພາບໄດ້ແນວໃດ
ເມື່ອໂພຄະພ້ອມມູນມີຢູ່ບໍ່ແມ່ນໜ້ອຍ ເຫດໃດຈຶ່ງໜ່າຍສຸກ
ປະສົບແຕ່ຄວາມທຸກຈົນທຸກມື້ນີ້

(ເຜດທັງສອງຕອບວ່າ)

[໘໐] ພວກເຮົາທັງສອງຕີກັນເອງແລ້ວດື່ມກິນເລືອດແລະໜອງຂອງກັນແລະກັນ
ໄດ້ດື່ມເລືອດແລະໜອງຫຼວງຫຼາຍກໍຍັງບໍ່ອີ່ມ ມີຄວາມຫິວຢູ່ປະຈໍາ

[໘໑] ຄົນທັງຫຼາຍຜູ້ບໍ່ໃຫ້ທານຕາຍໄປເກີດໃນຍົມມະໂລກ[໑]
ຍ່ອມຮ້ອງໄຫ້ຮໍ່າໄຮຄືແນວນີ້
ສັດເຫຼົ່າໃດໄດ້ປະສົບໂພຄະຕ່າງ ໆ ແລ້ວ
ບໍ່ໃຊ້ສອຍເອງ ທັງບໍ່ເຮັດບຸນ

[໗໔] ສັດເຫຼົ່ານັ້ນຈັກຕ້ອງປະສົບຄວາມຫິວກະຫາຍໃນປະຣະໂລກ
ພາຍຫຼັງ ຖືກຄວາມຫິວເປັນຕົ້ນແຜດເຜົາໄໝ້ຢູ່ສິ້ນການລະນານ
ຍ່ອມໄດ້ສະເຫວີຍທຸກ ຍ້ອນເຮັດກຳມີຜົນເຜັດຮ້ອນ ມີທຸກເປັນກຳໄລ

[໗໕] ຄວາມຈິງ ຊັບແລະທັນຍາຫານຢູ່ໄດ້ບໍ່ດົນ
ທັງຊີວິດຂອງສັດໃນມະນຸດສາໂລກນີ້ກໍສັ້ນເກີນໄປ
ບັນດິດຮູ້ສິ່ງເຫຼົ່ານີ້ຕາມຄວາມເປັນຈິງແລ້ວເພິ່ງເຮັດທີ່ເພິ່ງ

[໗໔] ເຫຼົ່າຊົນຜູ້ສະຫຼາດໃນທຳ
ຟັງຄຳສອນຂອງພຣະອະຣະຫັນທັງຫຼາຍແລ້ວ
ມາຮູ້ແຈ້ງແນວນີ້ ຍ່ອມບໍ່ຜະໝາດໃນທານ

**ນາຄະເປຕະວັດຖຸທີ ໑໑ ຈົບ**

## ໑໔. ອຸຣະຄະເປຕະວັດຖຸ

## ເລື່ອງເຜດຜູ້ຈາກໄປຄືງູລອກຄາບ

(ພາມ ເມື່ອຈະບອກເຫດແຫ່ງການບໍ່ຮ້ອງໄຫ້ ຈຶ່ງກ່າວ ໔ ຄາຖາວ່າ)

[໗໕] ບຸດຂອງຂ້ານ້ອຍລະຮ່າງກາຍຂອງຕົນໄປຄືງູລອກຄາບ
ໃນເມື່ອຮ່າງກາຍໃຊ້ການບໍ່ໄດ້ກໍຕາຍຈາກໄປແນວນີ້
[໗໖] ເມື່ອພວກຍາດເຜົາຢູ່ ບຸດຂອງຂ້ານ້ອຍກໍບໍ່ຮູ້ວ່າ
ພວກຍາດພາກັນຮ້ອງໄຫ້ຮ່ຳໄຮເຖິງ
ຍ້ອນເຫດນັ້ນ ຂ້ານ້ອຍຈຶ່ງບໍ່ຮ້ອງໄຫ້ເຖິງເຂົາ
ເຂົາໄປຕາມທາງຂອງເຂົາ

(ນາງພາມມະນີ ເມື່ອຈະບອກເຫດແຫ່ງການບໍ່ຮ້ອງໄຫ້ ຈຶ່ງກ່າວ ໔ ຄາຖາວ່າ)

[໗໗] ບຸດຂອງເຮົາ ເຮົາບໍ່ໄດ້ເຊີນມາ ກໍມາແລ້ວຈາກໂລກອື່ນນັ້ນ
ເຮົາບໍ່ໄດ້ອະນຸຍາດໃຫ້ໄປ ກໍໄປແລ້ວຈາກມະນຸດສາໂລກນີ້
ເຂົາມາແນວໃດ ເຂົາກໍໄປແລ້ວແນວນັ້ນ
ເປັນຫຍັງຈະຕ້ອງໄປຮ້ອງໄຫ້ເຖິງບຸກຄົນທີ່ບໍ່ຢູ່ໃນອຳນາດນັ້ນນໍ
[໗໘] ເມື່ອພວກຍາດເຜົາຢູ່ ບຸດຂອງເຮົາກໍບໍ່ຮູ້ວ່າ
ພວກຍາດພາກັນຮ້ອງໄຫ້ຮ່ຳໄຮເຖິງ

ຍ້ອນເຫດນັ້ນ ເຮົາຈຶ່ງບໍ່ຮ້ອງໄຫ້ເຖິງເຂົາ
ເຂົາໄປຕາມທາງຂອງເຂົາ

(ນ້ອງສາວກ່າວວ່າ)

[໗໙] ຖ້າເຮົາຮ້ອງໄຫ້ ກໍຈັກຈ່ອຍຜອມ
ຜົນອັນໃດຈະເພິ່ງມີແກ່ເຮົາໃນການຮ້ອງໄຫ້ນັ້ນ
ຍາດມິດແລະສະຫາຍຂອງພວກເຮົາຈະເພິ່ງມີຄວາມບໍ່ສະບາຍໃຈຢ່າງຍິ່ງ
[໘໐] ເມື່ອພວກຍາດເຜົາຢູ່ ອ້າຍຂອງເຮົາກໍບໍ່ຮູ້ວ່າ
ພວກຍາດພາກັນຮ້ອງໄຫ້ຮ່ຳໄຮເຖິງ
ຍ້ອນເຫດນັ້ນ ເຮົາຈຶ່ງບໍ່ຮ້ອງໄຫ້ເຖິງເຂົາ
ເຂົາໄປຕາມທາງຂອງເຂົາ

(ສ່ວນພັນລະຍາຂອງເຂົາກ່າວວ່າ)

[໘໑] ຜູ້ໃດເສົ້າໂສກເຖິງຄົນທີ່ລ່ວງລັບໄປແລ້ວ
ຄວາມໂສກເສົ້າຂອງຜູ້ນັ້ນ
ປຽບຄືເດັກອ່ອນຮ້ອງໄຫ້ຍາກໄດ້ດວງຈັນເຊິ່ງໂຄຈອນຢູ່
[໘໒] ເມື່ອພວກຍາດເຜົາຢູ່ ສາມີຂອງເຮົາກໍບໍ່ຮູ້ວ່າ
ພວກຍາດພາກັນຮ້ອງໄຫ້ຮ່ຳໄຮເຖິງ
ຍ້ອນເຫດນັ້ນ ເຮົາຈຶ່ງບໍ່ຮ້ອງໄຫ້ເຖິງເຂົາ
ເຂົາໄປຕາມທາງຂອງເຂົາ
(ສ່ວນນາງທາສີກ່າວວ່າ)
[໘໓] ທ່ານພາມ ໝໍ້ນ້ຳທີ່ແຕກແລ້ວ
ເພິ່ງປະສານໃຫ້ເປັນດັ່ງເດີມອີກບໍ່ໄດ້ສັນໃດ
ຄວາມໂສກເສົ້າເຖິງຜູ້ທີ່ລ່ວງລັບໄປແລ້ວ ກໍສັນນັ້ນ
[໘໔] ເມື່ອພວກຍາດເຜົາຢູ່ ນາຍຂອງເຮົາກໍບໍ່ຮູ້ວ່າ
ພວກຍາດພາກັນຮ້ອງໄຫ້ຮ່ຳໄຮເຖິງ
ຍ້ອນເຫດນັ້ນ ເຮົາຈຶ່ງບໍ່ຮ້ອງໄຫ້ເຖິງເຂົາ
ເຂົາໄປຕາມທາງຂອງເຂົາ

**ອຸຣະຄະເປຕະວັດຖຸທີ ໑໘ ຈົບ**

**ອຸຣະຄະວັກທີ ໑ ຈົບ**

## ລວມເລື້ອງເຜດທີ່ມີໃນວັກນີ້ ຄື



# ໒. ອຸບພະຣິວັກ

## ໝວດວ່າດ້ວຍພຣະນາງອຸບພະຣີກັບເຜດ

## ໑. ສັງສາຣະໂມຈະກະເປຕິວັດຖຸ

### ເລື້ອງນາງເຜດສັງສາຣະໂມຈິກາ

(ທ່ານພຣະສາຣີບຸດເຖຣະຖາມນາງເຜດຕົນໜຶ່ງວ່າ)

[໙໕] ດູຣານາງຜູ້ມີຮ່າງກາຍຈ່ອຍແຫ້ງ ມີແຕ່ກະດູກຂ້າງສຽບຂຶ້ນ
ທ່ານເປືອຍກາຍ ມີຜິວພັນແລະຮູບຮ່າງໜ້າກຽດຊັງເປັນຕາຢ້ານ
ຈ່ອຍແຫ້ງ ມີຮ່າງກາຍສະພັ່ງໄປດ້ວຍເສັ້ນເອັນ
ທ່ານເປັນໃຜກັນນໍມາຢືນຢູ່ບ່ອນນີ້

(ນາງເຜດຕອບວ່າ)

[໙໖] ພຣະຜູ້ເປັນເຈົ້າຜູ້ຈະເລີນ ຂ້ານ້ອຍເກີດເປັນເຜດໃນຍົມມະໂລກ
ໄດ້ຮັບຄວາມລຳບາກ ຍ້ອນເຮັດກຳຊົ່ວໄວ້
ຈຶ່ງຕ້ອງຈາກໂລກນີ້ໄປສູ່ເປຕະໂລກ

(ພຣະເຖຣະຖາມວ່າ)

[໙໗] ແຕ່ກ່ອນທ່ານໄດ້ເຮັດກຳຊົ່ວທາງກາຍ ວາຈາ ໃຈອັນໃດໄວ້ນໍ
ຍ້ອນຜົນກຳອັນໃດ
ທ່ານຈຶ່ງຕ້ອງຈາກມະນຸດສາໂລກນີ້ໄປສູ່ເປຕະໂລກ

(ນາງເຜດຕອບວ່າ)

[໙໗] ພຣະຜູ້ເປັນເຈົ້າຜູ້ຈະເລີນ ຊົນເຫຼົ່າໃດເປັນບິດາກໍຕາມ ມານດາກໍຕາມ
ຫຼືແມ່ນເປັນຍາດ ເພິ່ງຊັກຊວນຂ້ານ້ອຍວ່າ
ເຈົ້າຈົ່ງມີຈິດເຫຼື້ອມໃສໃຫ້ທານແກ່ສະມະນະພາມທັງຫຼາຍ
ຊົນຜູ້ອະນຸເຄາະແກ່ຂ້ານ້ອຍເຊັ່ນນັ້ນ ບໍ່ໄດ້ມີ

[໙໙] ຂໍ້ທີ່ຂ້ານ້ອຍເປັນເຜດເປືອຍກາຍ
ຖືກຄວາມຫິວແລະຄວາມກະຫາຍບຽດບຽນທ່ຽວໄປແນວນີ້
ຕະຫຼອດ ໕໐໐ ປີນັບແຕ່ບັດນີ້ໄປ
ນັ້ນເປັນຜົນກຳຊົ່ວຂອງຂ້ານ້ອຍ

[໑໐໐] ພຣະຜູ້ເປັນເຈົ້າຜູ້ແກ່ກ້າ ມີອານຸພາບຫຼາຍ
ຂ້ານ້ອຍມີຈິດເຫຼື້ອມໃສ ຂໍໄຫວ້ທ່ານ ແລະຂໍທ່ານຈົ່ງອະນຸເຄາະຂ້ານ້ອຍ
ພຣະຜູ້ເປັນເຈົ້າຜູ້ຈະເລີນ ຂໍທ່ານຈົ່ງໃຫ້ວັດຖຸທານແນວໃດແນວໜຶ່ງ
ແລ້ວອຸທິດສ່ວນບຸນແກ່ຂ້ານ້ອຍແດ່
ຂໍຈົ່ງຊ່ອຍຂ້ານ້ອຍໃຫ້ພົ້ນຈາກທຸກຄະຕິແດ່ເທີ້ນ

(ເພື່ອຈະສະແດງການທີ່ພຣະເຖຣະປະຕິບັດ ພຣະທຳສັງຄີຕິກາຈານຈຶ່ງກ່າວ ໓ ຄາຖາວ່າ)

[໑໐໑] ພຣະສາຣີບຸດເຖຣະເຊິ່ງເປັນຜູ້ອະນຸເຄາະນັ້ນຮັບຄຳນາງເຜດນັ້ນແລ້ວ
ຈຶ່ງຖວາຍເຂົ້າປັ້ນໜຶ່ງ ຜ້າມີຂະໜາດທໍ່ຝາມືພືນໜຶ່ງ
ແລະນ້ຳດື່ມຖ້ວຍໜຶ່ງ ແກ່ພິກຂຸແລ້ວອຸທິດສ່ວນບຸນໃຫ້ນາງເຜດນັ້ນ

[໑໐໒] ໃນລຳດັບທີ່ພຣະເຖຣະອຸທິດສ່ວນບຸນໃຫ້ນັ້ນເອງ
ວິບາກຄືອາຫານ ເຄື່ອງນຸ່ງຫົ່ມ ແລະນ້ຳດື່ມ
ກໍເກີດຂຶ້ນແກ່ນາງເຜດນັ້ນ ນີ້ເປັນຜົນແຫ່ງທັກຂິນາ

[໑໐໓] ລຳດັບນັ້ນ ນາງມີຮ່າງກາຍມົດຈົດ ນຸ່ງຜ້າສະອາດ
ນຸ່ງຫົ່ມຜ້າເນື້ອດີກວ່າຜ້າແຄວ້ນກາສີ
ມີພັດສະຕາພອນແລະເຄື່ອງປະດັບວິຈິດງົດງາມ
ເຂົ້າໄປຫາພຣະສາຣີບຸດເຖຣະ

(ພຣະສາຣີບຸດເຖຣະຖາມວ່າ)

[໑໐໔] ນາງເທບທິດາ ທ່ານມີຜິວພັນງົດງາມຫຼາຍ
ເປ່ງຣັດສະໝີສະຫວ່າງສະໄຫວໄປທົ່ວທຸກທິດສະຖິດຢູ່ ຄືດາວປະກາຍພຶກ

[໑໐໕] ຍ້ອນບຸນອັນໃດທ່ານຈຶ່ງມີຜິວພັນງາມແນວນີ້
ຜົນອັນເພິ່ງປາຖະໜາຈຶ່ງສຳເລັດແກ່ທ່ານໃນວິມານນີ້
ໂພຄະທັງມວນລ້ວນໜ້າພໍໃຈຈຶ່ງເກີດຂຶ້ນແກ່ທ່ານ

[໑໐໖] ນາງເທບທິດາຜູ້ມີອານຸພາບຫຼາຍ ອາດຕະມາຂໍຖາມວ່າ
ສະໄໝເມື່ອທ່ານເກີດເປັນມະນຸດໄດ້ເຮັດບຸນອັນໃດໄວ້
ແມ່ນຍ້ອນບຸນອັນໃດທ່ານຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

(ເທບທິດານັ້ນຕອບວ່າ)

[໑໐໗] (ແຕ່ກ່ອນ) ພຣະຜູ້ເປັນເຈົ້າເປັນມຸນີມີຄວາມກະລຸນາໃນໂລກ
ໄດ້ເຫັນຂ້ານ້ອຍຊູບຊີດຈ່ອຍເຫຼືອງ ຫິວໂຫຍ
ເປືອຍກາຍ ມີຜິວແຕກເປັນຮອຍຫຍໍ່ ໄດ້ຮັບຄວາມທຸກ

[໑໐໘] ໄດ້ຖວາຍເຂົ້າປັ້ນໜຶ່ງ ຜ້າມີຂະໜາດທໍ່ຝາມືຜືນໜຶ່ງ
ແລະນ້ຳດື່ມຖ້ວຍໜຶ່ງ ແກ່ພິກຂຸແລ້ວອຸທິດສ່ວນບຸນໃຫ້ຂ້ານ້ອຍ

[໑໐໙] ຂໍພຣະຜູ້ເປັນເຈົ້າຈົ່ງເບິ່ງຜົນແຫ່ງຄຳເຂົ້າ
ຂ້ານ້ອຍສົມບູນດ້ວຍການທີ່ໜ້າອອນຊອນ
ບໍຣິໂພກເຂົ້າມີກັບເຂົ້າເຊິ່ງມີຣົດຫຼາຍແນວ ເຖິງ ໑,໐໐໐ ປີ

[໑໑໐] ຂໍພຣະຜູ້ເປັນເຈົ້າຈົ່ງເບິ່ງວິບາກແຫ່ງຜ້າທີ່ມີຂະໜາດທໍ່ຝາມືວ່າເປັນແນວໃດ
ຜ້າໃນແຄວ້ນຂອງພຣະເຈົ້ານັນທະຣາດມີປະມານທໍ່ໃດ

[໑໑໑] ພຣະຜູ້ເປັນເຈົ້າຜູ້ຈະເລີນ ຜ້ານຸ່ງຜ້າຫົ່ມຂອງຂ້ານ້ອຍມີຫຼາຍກວ່ານັ້ນ
ຄື ຜ້າໄໝ ຜ້າຂົນສັດ ຜ້າປ່ານ ແລະຜ້າຝ້າຍ

[໑໑໒] ຜ້າເຫຼົ່ານັ້ນທັງຍາວ ທັງກວ້າງ ມີລາຄາແພງ ຫ້ອຍຢູ່ໃນອາກາດ
ຂ້ານ້ອຍເລືອກເອົາແຕ່ຜືນທີ່ພໍໃຈນຸ່ງຫົ່ມ
[໑໑໓] ອັນໜຶ່ງ ຂໍພຣະຜູ້ເປັນເຈົ້າຈົ່ງເບິ່ງວິບາກແຫ່ງການຖວາຍນ້ຳດື່ມຖ້ວຍໜຶ່ງ
ວ່າມີຜົນແນວໃດ ສະໂບກຂະຣະນີ ໔ ຫຼ່ຽມ ເລິກ ທີ່ສ້າງໄວ້ດີແລ້ວ

[໑໑໔] ມີທ່າພຽງ ມີນ້ຳໃສເຢັນ ມີກິ່ນຫອມ ຫາສິ່ງປຽບບໍ່ໄດ້
ໜາແໜ້ນໄປດ້ວຍດອກບົວຫຼວງແລະດອກບົວ
ເຕັມດ້ວຍນ້ຳເຊິ່ງເດຍລະດາດດ້ວຍເກສອນດອກບົວ

[໑໑໕] ຂ້ານ້ອຍເປັນຜູ້ບໍ່ມີໄພແຕ່ບ່ອນໃດ ຍ່ອມອອນຊອນແຈ່ມໃສບັນເທີງໃຈ
ພຣະຜູ້ເປັນເຈົ້າຜູ້ຈະເລີນ ຂ້ານ້ອຍມາເພື່ອຈະໄຫວ້ພຣະຜູ້ເປັນເຈົ້າ
ຜູ້ເປັນປາດ ມີຄວາມກະລຸນາໃນໂລກ

**ສັງສາຣະໂມຈະກະເປຕິວັດຖຸທີ ໑ ຈົບ**

# ໔. ສາຣີປຸດຕະເຖຣະມາຕຸເປຕິວັດຖຸ

## ເລື້ອງນາງເຜດອະດີດມານດາພຣະສາຣີບຸດເຖຣະ

(ພຣະສາຣີບຸດເຖຣະຖາມນາງເຜດຕົນໜຶ່ງວ່າ)

[໑໑໖] ດູຣານາງຜູ້ມີຮ່າງກາຍຈ່ອຍແຫ້ງ ມີແຕ່ກະດູກຂ້າງສຽບຂຶ້ນ
ທ່ານເປືອຍກາຍ ມີຜິວພັນແລະຮູບຮ່າງໜ້າກຽດຊັງເປັນຕາຢ້ານ
ຈ່ອຍແຫ້ງ ມີຮ່າງກາຍສະພັ່ງໄປດ້ວຍເສັ້ນເອັນ
ທ່ານເປັນໃຜກັນນໍມາຢືນຢູ່ໃນບ່ອນນີ້

(ນາງເຜດຕອບວ່າ)

[໑໑໗] ແຕ່ກ່ອນໃນຊາດອື່ນ ໆ
ຂ້ານ້ອຍເກີດໃນຕະກູນສາກະຍະ ເປັນມານດາຂອງທ່ານ
ຂ້ານ້ອຍເຂົ້າເຖິງເປຕະວິໄສ ຖືກຄວາມຫິວກະຫາຍຄອບງຳ

[໑໑໘] ຂ້ານ້ອຍຖືກຄວາມຫິວກະຫາຍຄອບງຳແລ້ວ
ຈຶ່ງກິນນ້ຳລາຍ ນ້ຳມູກ ເສມຫະທີ່ເຂົາຖົ່ມຖິ້ມແລ້ວ
ກິນມັນແຫຼວຊາກສົບທີ່ຖືກເຜົາຢູ່
ແລະກິນໂລຫິດຂອງຍິງທັງຫຼາຍຜູ້ຄອດລູກ

[໑໑໙] ກິນໂລຫິດຂອງຄົນທີ່ມີບາດແລະຜູ້ທີ່ຖືກຕັດດັງແລະຫູ
ແລະກິນໜັງ ຊີ້ນ ເອັນເປັນຕົ້ນ ທີ່ອາໄສຮ່າງກາຍຊາຍຍິງ

[໑໒໐] ຂ້ານ້ອຍບໍ່ມີບ່ອນເພິ່ງ ບໍ່ມີບ່ອນຢູ່ອາໄສ ນອນເທິງຕຽງອັນເປີເປື້ອນ

ກິນໜອງແລະເລືອດຂອງປະສຸສັດແລະມະນຸດທັງຫຼາຍ

[໑໔໑] ລູກນ້ອຍເອີຍ ຂໍລູກຈົ່ງໃຫ້ທານເພື່ອແມ່
ເມື່ອໃຫ້ແລ້ວຈົ່ງອຸທິດສ່ວນບຸນນັ້ນໃຫ້ແມ່ແດ່
ຖ້າຈັ່ງໃດ ແມ່ຈະເພິ່ງພົ້ນຈາກການກິນໜອງແລະເລືອດ

[໑໔໒] ພຣະສາຣີບຸດເຖຣະຟັງຄຳຂອງມານດາແລ້ວຄິດຈະຊ່ວຍເຫຼືອ
ຈຶ່ງເປີກສາພຣະມະຫາໂມກຄັນລານະເຖຣະ ພຣະອະນຸຣຸດທະ ແລະພຣະກັບປິນະ

[໑໔໓] ໄດ້ສ້າງກຸດຕິ ໔ ຫຼັງ ແລ້ວຖວາຍກຸດຕິ ເຂົ້າ ແລະນ້ຳ
ແດ່ພຣະສົງຜູ້ມາຈາກທິດທັງ ໔ ອຸທິດສ່ວນບຸນໃຫ້ມານດາ

[໑໔໔] ໃນລຳດັບທີ່ພຣະເຖຣະອຸທິດສ່ວນບຸນໃຫ້ນັ້ນເອງ
ວິບາກຄື ອາຫານ ນ້ຳດື່ມ ແລະເຄື່ອງນຸ່ງຫົ່ມ
ກໍເກີດຂຶ້ນແກ່ນາງເຜດນັ້ນ ນີ້ເປັນຜົນແຫ່ງທັກຂິນາ

[໑໔໕] ລຳດັບນັ້ນ ນາງມີຮ່າງກາຍມົດຈົດ ນຸ່ງຜ້າສະອາດ
ນຸ່ງຫົ່ມຜ້າເນື້ອດີກວ່າຜ້າແຄວັນກາສີ
ມີພັດສະຕາພອນແລະເຄື່ອງປະດັບວິຈິດງົດງາມ
ເຂົ້າໄປຫາພຣະມະຫາໂມກຄັນລານະເຖຣະ

(ພຣະມະຫາໂມກຄັນລານະເຖຣະຖາມນາງເຜດນັ້ນວ່າ)

[໑໔໖] ນາງເທບທິດາ ທ່ານມີຜິວພັນງາມຍິ່ງ
ເປ່ງຣັດສະໝີສະຫວ່າງສະໄຫວໄປທົ່ວທຸກທິດສະຖິດຢູ່ ຄືດາວປະກາຍພຶກ

[໑໔໗] ຍ້ອນບຸນອັນໃດທ່ານຈຶ່ງມີຜິວພັນງາມແນວນີ້
ຜົນອັນເພິ່ງປາຖະໜາຈຶ່ງສຳເລັດແກ່ທ່ານໃນວິມານນີ້
ແລະໂພຄະທັງມວນລ້ວນໜ້າພໍໃຈຈຶ່ງເກີດຂຶ້ນແກ່ທ່ານ

[໑໔໘] ນາງເທບທິດາຜູ້ມີອານຸພາບຫຼາຍ ອາດຕະມາຂໍຖາມວ່າ
ສະໄໝເມື່ອທ່ານເກີດເປັນມະນຸດໄດ້ເຮັດບຸນອັນໃດໄວ້
ຍ້ອນບຸນອັນໃດທ່ານຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

(ເທບທິດານັ້ນຕອບວ່າ)

[໑໔໙] ແຕ່ກ່ອນໃນຊາດອື່ນ ໆ ຂ້ານ້ອຍເປັນມານດາຂອງພຣະສາຣີບຸດເຖຣະ
ເຂົ້າເຖິງເປຕະວິໄສ° ຖືກຄວາມຫິວກະຫາຍຄອບງຳ

[໑໕໐] ຂ້ານ້ອຍຖືກຄວາມຫິວກະຫາຍຄອບງຳແລ້ວ
ໄດ້ກິນນ້ຳລາຍ ນ້ຳມູກ ເສມຫະທີ່ເຂົາຖິ່ມຖິ້ມແລ້ວ
ກິນມັນແຫຼວຊາກສົບທີ່ຖືກເຜົາຢູ່
ແລະກິນໂລຫິດຂອງຍິງທັງຫຼາຍຜູ້ຄອດລູກ

[໑໕໑] ກິນໂລຫິດຂອງຄົນທີ່ມີບາດແລະຜູ້ທີ່ຖືກຕັດດັງແລະຫົວ
ແລະກິນໜັງ ຊີ້ນ ເອັນເປັນຕົ້ນ ທີ່ອາໄສຮ່າງກາຍຊາຍຍິງ

[໑໕໔] ຂ້ານ້ອຍບໍ່ມີບ່ອນເພິ່ງ ບໍ່ມີບ່ອນຢູ່ອາໄສ ນອນເທິງຕຽງອັນເປິເປື້ອນ
ກິນໜອງແລະເລືອດຂອງປະສຸສັດແລະມະນຸດທັງຫຼາຍ

[໑໕໕] ຂ້ານ້ອຍບັນເທີງຢູ່ຍ້ອນທານຂອງພຣະສາຣີບຸດ ຈຶ່ງບໍ່ມີໄພແຕ່ບ່ອນໃດ ໆ
ພຣະຜູ້ເປັນເຈົ້າຜູ້ຈະເລີນ ຂ້ານ້ອຍຈະໄຫວ້ພຣະສາຣີບຸດ
ຜູ້ເປັນປາດ ມີຄວາມກະລຸນາໃນໂລກ

**ສາຣີປຸດຕະເຖຣະມາຕຸເປຕິວັດຖຸທີ ໘ ຈົບ**

# ໙. ມັດຕາເປຕິວັດຖຸ

## ເລື້ອງນາງມັດຕາເຜດ

(ນາງຕິດສາຖາມນາງເຜດຕົນໜຶ່ງວ່າ)

[໑໕໔] ນາງເຜດຜູ້ມີຮ່າງກາຍຈ່ອຍແຫ້ງ ມີແຕ່ກະດູກຂ້າງສຽບຂຶ້ນ
ທ່ານເປືອຍກາຍ ມີຜິວພັນແລະຮູບຮ່າງໜ້າກຽດຊັງ ເປັນຕາຢ້ານ
ຈ່ອຍແຫ້ງ ມີຮ່າງກາຍສະພັ່ງໄປດ້ວຍເສັ້ນເອັນ
ທ່ານເປັນໃຜກັນນໍມາຢືນຢູ່ໃນບ່ອນນີ້

(ນາງເຜດນັ້ນຕອບວ່າ)

[໑໕໕] ແຕ່ກ່ອນ ຂ້ອຍຊື່ມັດຕາ ເຈົ້າຊື່ຕິດສາ
ຂ້ອຍເປັນຍິງຮ່ວມສາມີຂອງເຈົ້າ
ຍ້ອນເຮັດກຳຊົ່ວໄວ້ ຈຶ່ງຕ້ອງຈາກມະນຸດສາໂລກນີ້ໄປສູ່ເປຕະໂລກ

(ນາງຕິດສາຖາມວ່າ)

[໑໖໖] ແຕ່ກ່ອນເຈົ້າໄດ້ເຮັດກຳຊົ່ວທາງກາຍ ວາຈາ ໃຈອັນໃດໄວ້ບໍ
ຍ້ອນຜົນກຳອັນໃດເຈົ້າຈຶ່ງຕ້ອງຈາກມະນຸດສາໂລກນີ້ໄປສູ່ເປຕະໂລກ

(ນາງເຜດນັ້ນຕອບວ່າ)

[໑໖໗] ຂ້ອຍເປັນຍິງດຸຮ້າຍ ຫຍາບຄາຍ ຣິດສະຫຍາ ຂີ້ຖີ່ ແລະມັກໂອ້ອວດ
ໄດ້ກ່າວວາຈາຊົ່ວຕໍ່ເຈົ້າ ຈຶ່ງຈາກມະນຸດສາໂລກນີ້ໄປສູ່ເປຕະໂລກ
(ນາງຕິດສາຖາມວ່າ)

[໑໖໘] ເລື້ອງນັ້ນເປັນຄວາມຈິງ ເຖິງເຮົາກໍຮູ້ວ່າ ເຈົ້າເປັນຍິງດຸຮ້າຍແນວໃດ
ແຕ່ຢາກຈະຖາມເຈົ້າເຖິງເລື້ອງອື່ນ
ຍ້ອນກຳອັນໃດ ເຈົ້າຈຶ່ງມີຮ່າງກາຍເປື້ອນຝຸ່ນ

(ນາງເຜດນັ້ນຕອບວ່າ)

[໑໖໙] ເຈົ້າກັບຂ້ອຍພາກັນອາບນ້ຳຊຳຣະຮ່າງກາຍແລ້ວ
ເຈົ້າໄດ້ນຸ່ງຫົ່ມຜ້າສະອາດ ປະດັບຕົກແຕ່ງຮ່າງກາຍແລ້ວ
ສ່ວນຂ້ອຍປະດັບຕົກແຕ່ງຮຽບຮ້ອຍຍິ່ງກວ່າເຈົ້າຫຼາຍເທົ່າ

[໑໘໐] ເມື່ອຂ້ອຍນັ້ນກຳລັງຈ້ອງແນມເບິ່ງເຈົ້າຄຸຍຢູ່ກັບສາມີ
ບັດນັ້ນຂ້ອຍຈຶ່ງເກີດຄວາມຣິດສະຫຍາແລະຄວາມໂກດຫຼວງຫຼາຍ

[໑໘໑] ທັນໃດນັ້ນ ສັນໄດ້ກວາດຫອບຝຸ່ນແລ້ວເອົາຝຸ່ນໂຮຍໃສ່ເຈົ້າ
ຍ້ອນຜົນກຳນັ້ນຂ້ອຍຈຶ່ງມີຮ່າງກາຍເປື້ອນຝຸ່ນ

(ນາງຕິດສາຖາມວ່າ)

[໑໘໒] ເລື້ອງນີ້ເປັນຄວາມຈິງ ເຖິງຂ້ອຍກໍຮູ້ວ່າ ເຈົ້າເອົາຝຸ່ນໂຮຍໃສ່ຂ້ອຍ
ແຕ່ຂ້ອຍຢາກຈະຖາມທ່ານເຖິງເລື້ອງອື່ນ ຍ້ອນກຳອັນໃດທ່ານຈຶ່ງເປັນຫິດ

(ນາງເຜດນັ້ນຕອບວ່າ)

[໑໘໓] ເຮົາທັງສອງເປັນຄົນຫາຢາ ໄດ້ພາກັນໄປປ່າ
ເຈົ້າຫາຢາມາໄດ້ ສ່ວນຂ້ອຍນຳໝາກຕຳແຍມາ

[໑໔໔]	ເມື່ອເຈົ້າເຜີ ຂ້ອຍໄດ້ໂຮຍໝາກຕຳແຍລົງເທິງບ່ອນນອນຂອງເຈົ້າຈົນທົ່ວ
ຍ້ອນຜົນກຳນັ້ນຂ້ອຍຈຶ່ງເປັນທິດ

(ນາງຕິດສາຖາມວ່າ)

[໑໔໕]	ເລື້ອງນີ້ເປັນຄວາມຈິງ ເຖິງຂ້ອຍກໍຮູ້ວ່າ
ເຈົ້າໂຮຍໝາກຕຳແຍລົງເທິງບ່ອນນອນຂອງຂ້ອຍຈົນທົ່ວ
ແຕ່ຂ້ອຍຢາກຈະຖາມເຈົ້າເຖິງເລື້ອງອື່ນ
ຍ້ອນກຳອັນໃດເຈົ້າຈຶ່ງເປັນຍິງເປືອຍກາຍ

(ນາງເຜດນັ້ນຕອບວ່າ)

[໑໔໖]	(ມື້ໜຶ່ງ) ໄດ້ມີການປະຊຸມມິດສະຫາຍແລະຍາດທັງຫຼາຍ
ເຈົ້າໄດ້ຮັບເຊີນ ແຕ່ຂ້ອຍເຊິ່ງຮ່ວມສາມີກັບເຈົ້າບໍ່ມີໃຜເຊີນເລີຍ

[໑໔໗]	ເມື່ອເຈົ້າເຜີ ຂ້ອຍໄດ້ລັກເອົາຜ້າເຈົ້າໄປ
ຍ້ອນຜົນກຳນັ້ນ ຂ້ອຍຈຶ່ງເປັນຍິງເປືອຍກາຍ

(ນາງຕິດສາຖາມວ່າ)

[໑໔໗]	ເລື້ອງນີ້ເປັນຄວາມຈິງ ເຖິງຂ້ອຍກໍຮູ້ວ່າ
ເຈົ້າລັກເອົາຜ້າຂ້ອຍໄປ ແຕ່ຂ້ອຍຢາກຈະຖາມເຈົ້າເຖິງເລື້ອງອື່ນ
ຍ້ອນກຳອັນໃດເຈົ້າຈຶ່ງມີກິ່ນກາຍເໝັນດັ່ງກິ່ນຄູດ

(ນາງເຜດນັ້ນຕອບວ່າ)

[໑໔໙]	ຂ້ອຍໄດ້ຖິ້ມທໍ່ຂອງຫອມ ດອກໄມ້
ແລະເຄື່ອງລູບທາເຊິ່ງມີລາຄາແພງຂອງເຈົ້າລົງວິດ
ຂ້ອຍເຮັດບາບຊົ່ວຊ້ານັ້ນໄວ້ແລ້ວ
ຍ້ອນຜົນກຳນັ້ນ ຂ້ອຍຈຶ່ງມີກາຍເໝັນດັ່ງກິ່ນຄູດ

(ນາງຕິດສາຖາມວ່າ)

[໑໕໐]	ເລື້ອງນີ້ເປັນຄວາມຈິງ ເຖິງຂ້ອຍກໍຮູ້ວ່າ ເຈົ້າເຮັດບາບນັ້ນໄວ້ແລ້ວ
ແຕ່ຂ້ອຍຢາກຈະຖາມເຈົ້າເຖິງເລື້ອງອື່ນ
ຍ້ອນກຳອັນໃດເຈົ້າຈຶ່ງເປັນຄົນທຸກຍາກ

(ນາງເຜດນັ້ນຕອບວ່າ)

[໑໕໑] ທີ່ເຮືອນຂອງຂ້ອຍທັງສອງໄດ້ມີຊັບຢູ່ທົ່ກັນ
ເມື່ອວັດຖຸທານມີຢູ່ ຂ້ອຍບໍ່ໄດ້ເຮັດທີ່ເພິ່ງສຳລັບຕົນ
ຍ້ອນຜົນກຳນັ້ນຂ້ອຍຈຶ່ງເປັນຄົນທຸກຍາກ

[໑໕໒] ຄັ້ງນັ້ນ ເຈົ້າໄດ້ກ່າວຕັກເຕືອນຂ້ອຍ ຫ້າມບໍ່ໃຫ້ເຮັດກຳຊົ່ວວ່າ
ເຈົ້າຈະບໍ່ມີທາງໄດ້ສຸກຄະຕິ ຍ້ອນກຳຊົ່ວ

(ນາງຕິດສາກ່າວວ່າ)

[໑໕໓] ເຈົ້າບໍ່ເຊື່ອຂ້ອຍ ແລ້ວກັບຣິດສະຫຍາຂ້ອຍອີກ ເຊີນເຈົ້າເບິ່ງຜົນກຳຊົ່ວ

[໑໕໔] ແຕ່ກ່ອນ ທີ່ເຮືອນຂອງເຈົ້າໄດ້ມີນາງທາສີແລະເຄື່ອງປະດັບເຫຼົ່ານີ້
ແຕ່ດຽວນີ້ ນາງທາສີເຫຼົ່ານັ້ນພາກັນຮັບໃຊ້ຄົນອື່ນ
ໂພຄະທັງຫຼາຍເປັນຂອງບໍ່ແນ່ນອນ

[໑໕໕] ບັດນີ້ ກຸດຸມພີຜູ້ເປັນບິດາຂອງບຸດຂ້ອຍ
ຈັກກັບຈາກຕະຫຼາດມາຍັງເຮືອນນີ້
ເຈົ້າຢ່າຟ້າວໄປຈາກບ່ອນນີ້ກ່ອນເດີ່
ບາງເທື່ອເຂົາກັບມາຈະເພິ່ງໃຫ້ອັນໃດແກ່ເຈົ້າແດ່

(ນາງເຜດນັ້ນຕອບວ່າ)

[໑໕໖] ຂ້ອຍເປືອຍກາຍ ມີຮູບຮ່າງໜ້າກຽດຊັງເປັນຕາຢ້ານ
ຈ່ອຍແຫ້ງ ມີຮ່າງກາຍສະພັ່ງໄປດ້ວຍເສັ້ນເອັນ
ການເປືອຍກາຍແລະການມີຮູບຮ່າງໜ້າກຽດຊັງເປັນຕາຢ້ານນີ້
ເປັນສິ່ງທີ່ໜ້າລະອາຍສຳລັບຍິງທັງຫຼາຍ
ກຸດຸມພີຜູ້ເປັນບິດາຂອງບຸດຢ່າໄດ້ເຫັນຂ້ອຍເລີຍ

(ນາງຕິດສາກ່າວວ່າ)

[໑໕໗] ວ່າມາໂລດ ຂ້ອຍຈະໃຫ້ຫຼືເຮັດຫຍັງແກ່ເຈົ້າໄດ້
ທີ່ເປັນເຫດໃຫ້ເຈົ້າມີຄວາມສຸກ
ສຳເລັດຄວາມປາຖະໜາທຸກຢ່າງ
ຂ້ອຍພ້ອມຈະໃຫ້ຫຼືກະທຳແກ່ເຈົ້າ

(ນາງເຜດນັ້ນຕອບວ່າ)

[໑໔໗] ຂໍເຈົ້າຈົ່ງນິມົນພິກຂຸ ໔ ອົງຈາກສົງ
ນິມົນເຈາະຈົງອີກ ໔ ອົງ ລວມເປັນ ໗ ອົງ
ໃຫ້ສັນພັດຕາຫານແລ້ວອຸທິດສ່ວນບຸນໃຫ້ຂ້ອຍ
ເມື່ອນັ້ນ ຂ້ອຍຈັກໄດ້ຮັບຄວາມສຸກ
ສຳເລັດຄວາມປາຖະໜາທຸກຢ່າງ

[໑໔໙] ນາງຕິດສານັ້ນຮັບວ່າ ໄດ້
ແລ້ວນິມົນພິກຂຸ ໗ ອົງໃຫ້ສັນພັດຕາຫານ
ໃຫ້ຄອງໄຕຣຈີວອນ ແລ້ວອຸທິດສ່ວນບຸນໃຫ້ນາງເຜດນັ້ນ

[໑໕໐] ໃນລຳດັບທີ່ນາງຕິດສາອຸທິດສ່ວນບຸນໃຫ້ນັ້ນເອງ
ວິບາກຄືອາຫານ ເຄື່ອງນຸ່ງຫົ່ມ ແລະນ້ຳດື່ມ
ກໍເກີດຂຶ້ນແກ່ນາງເຜດນັ້ນ ນີ້ເປັນຜົນແຫ່ງທັກຂິນາ

[໑໕໑] ທັນໃດນັ້ນ ນາງເຜດມີຮ່າງກາຍມົດຈົດ ນຸ່ງຜ້າສະອາດ
ນຸ່ງຫົ່ມຜ້າເນື້ອດີກວ່າຜ້າແຄວັນກາສີ
ມີພັດຕາພອນແລະເຄື່ອງປະດັບວິຈິດງົດງາມ
ເຂົ້າໄປຫານາງຕິດສາເຊິ່ງເປັນຍິງຮ່ວມສາມີ

(ນາງຕິດສາຈຶ່ງຖາມວ່າ)

[໑໕໒] ເທບທິດາ ທ່ານມີຜິວພັນງາມຍິ່ງ
ເປ່ງຣັດສະໝີສະຫວ່າງສະໄຫວໄປທົ່ວທຸກທິດ
ສະຖິດຢູ່ຄືດາວປະກາຍພຶກ

[໑໕໓] ຍ້ອນບຸນອັນໃດທ່ານຈຶ່ງມີຜິວພັນງາມແນວນີ້
ຜົນອັນເພິ່ງປາຖະໜາຈຶ່ງສຳເລັດແກ່ທ່ານໃນວິມານນີ້
ແລະໂພຄະທັງມວນລ້ວນໜ້າພໍໃຈຈຶ່ງເກີດຂຶ້ນແກ່ທ່ານ

[໑໕໔] ເທບທິດາຜູ້ມີອານຸພາບຫຼາຍ ຂ້ອຍຂໍຖາມວ່າ
ສະໄໝເມື່ອເຈົ້າເກີດເປັນມະນຸດໄດ້ເຮັດບຸນອັນໃດໄວ້
ຍ້ອນບຸນອັນໃດທ່ານຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

(ນາງມັດຕາເທບທິດາຕອບວ່າ)

[໑໖໕] ແຕ່ກ່ອນ ຂ້ອຍຊື່ມັດຕາ ເຈົ້າຊື່ຕິດສາ
ຂ້ອຍເປັນຍິງຮ່ວມສາມີຂອງເຈົ້າ
ຍ້ອນເຮັດກຳຊົ່ວໄວ້ຈຶ່ງຕ້ອງຈາກໂລກນີ້ໄປສູ່ເປຕະໂລກ

[໑໖໖] ຂ້ອຍບັນເທີງຢູ່ຍ້ອນທານທີ່ເຈົ້າອຸທິດໃຫ້ແລ້ວ ຈຶ່ງບໍ່ມີໄພແຕ່ບ່ອນໃດ
ນ້ອງສາວ ຂໍເຈົ້າພ້ອມດ້ວຍໝູ່ຍາດທຸກຄົນຈົ່ງມີອາຍຸຍືນຍາວເທີ້ນ
ຈົ່ງເຂົ້າເຖິງສະຖານທີ່ທີ່ບໍ່ມີຄວາມເສົ້າໂສກ ປາສະຈາກທຸລີ
ມີຄວາມສຸກສະບາຍເຊິ່ງເປັນບ່ອນຢູ່ຂອງທ້າວວະສະວັດດີ

[໑໖໗] ເຈົ້າຜູ້ມີຮູບງາມ ເຈົ້າປະພຶດທຳ ໃຫ້ທານໃນໂລກນີ້
ກຳຈັດມົນທິນຄືຄວາມຂີ້ຖີ່ພ້ອມທັງເຫດໄດ້ແລ້ວ
ບໍ່ມີໃຜຕຳໜິຕິຕຽນໄດ້ ຈົ່ງເຂົ້າເຖິງໂລກສະຫວັນ

**ມັດຕາເປຕິວັດຖຸທີ ໓ ຈົບ**

# ໔. ນັນທາເປຕິວັດຖຸ

## ເລື້ອງນາງນັນທາເຜດ

(ນັນທິເສນອຸປາສົກຖາມວ່າ)

[໑໖໘] ທ່ານມີຜິວດຳ ຮູບຮ່າງໜ້າກຽດຊັງ
ຜິວພັນຫຍາບກ້ານ ແນມເບິ່ງເປັນຕາຢ້ານ
ຕາເຫຼືອງ ມີແຂ້ວສີນ້ຳຕານແກ່ ເຮົາຮູ້ວ່າທ່ານບໍ່ແມ່ນມະນຸດ

(ນາງເຜດນັ້ນຕອບວ່າ)

[໑໖໙] ທ່ານນັນທິເສນ ແຕ່ກ່ອນຜູ້ຂ້າຊື່ນັນທາ ເປັນພັນລະຍາຂອງທ່ານ
ຍ້ອນເຮັດກຳຊົ່ວໄວ້ ຈຶ່ງຕ້ອງຈາກໂລກນີ້ໄປສູ່ເປຕະໂລກ

(ນັນທິເສນອຸປາສົກຖາມວ່າ)

[໑໗໐] ແຕ່ກ່ອນທ່ານໄດ້ເຮັດກຳຊົ່ວທາງກາຍ ວາຈາ ໃຈອັນໃດໄວ້ນໍ
ຍ້ອນຜົນກຳອັນໃດທ່ານຈຶ່ງຈາກໂລກນີ້ໄປສູ່ເປຕະໂລກ

(ນາງເຜດນັ້ນຕອບວ່າ)

[໑໗໑] (ແຕ່ກ່ອນ) ຜູ້ຂ້າເປັນຍິງດຸຮ້າຍ ຫຍາບຄາຍ
ແລະບໍ່ເຄົາລົບທ່ານ ໄດ້ກ່າວວາຈາຊົ່ວຮ້າຍກັບທ່ານ
ຈຶ່ງຕ້ອງຈາກໂລກນີ້ໄປສູ່ເປຕະໂລກ

(ນັນທິເສນອຸປາສິກກ່າວວ່າ)

[໑໗໔] ເອົາລະ ເຮົາຈະໃຫ້ຜ້າຢ່າງດີແກ່ທ່ານ ທ່ານຈົ່ງນຸ່ງຜ້ານີ້
ນຸ່ງສຳເລັດແລ້ວຈົ່ງມາ ເຮົາຈັກນຳທ່ານໄປເຮືອນ

[໑໗໓] ທ່ານໄປເຮືອນແລ້ວ ຈັກໄດ້ຜ້າ ເຂົ້າ ແລະນ້ຳ
ທັງຈັກໄດ້ເຫັນບຸດແລະລູກໃພ້ທັງຫຼາຍຂອງທ່ານ

(ນາງເຜດນັ້ນຕອບວ່າ)

[໑໗໔] ຜ້ານັ້ນເຖິງທ່ານຈະຈັບຍື່ນໃຫ້ທີ່ມືຂອງຜູ້ຂ້າເອງ ກໍບໍ່ສຳເລັດແກ່ຜູ້ຂ້າ
ທ່ານຈົ່ງລ້ຽງພິກຂຸທັງຫຼາຍຜູ້ມີສີນສົມບູນ
ປາສະຈາກຣາຄະ ເປັນພະຫູສູດ

[໑໗໕] ໃຫ້ອີ່ມໜຳດ້ວຍເຂົ້າແລະນ້ຳ ຈົ່ງອຸທິດສ່ວນບຸນໃຫ້ຜູ້ຂ້າ
ເມື່ອນັ້ນ ຜູ້ຂ້າຈັກມີຄວາມສຸກ ສຳເລັດຄວາມປາຖະໜາທຸກຢ່າງ

[໑໗໖] ນັນທິເສນອຸປາສິກນັ້ນຮັບຄຳແລ້ວໄດ້ຖວາຍທານຫຼວງຫຼາຍ
ຄື ເຂົ້າ ນ້ຳ ຂອງຫຍ້ຳ ຜ້າ ເສນາສະນະ
ຮົ່ມ ຂອງຫອມ ດອກໄມ້ ແລະເກີບຕ່າງ ໆ

[໑໗໗] ແລະລ້ຽງພິກຂຸທັງຫຼາຍຜູ້ມີສີນສົມບູນ ປາສະຈາກຣາຄະ
ເປັນພະຫູສູດ ໃຫ້ອີ່ມໜຳດ້ວຍເຂົ້າແລະນ້ຳ
ແລ້ວອຸທິດສ່ວນບຸນໃຫ້ນາງນັນທານັ້ນ

[໑໗໘] ໃນລຳດັບທີ່ນັນທິເສນອຸປາສິກອຸທິດສ່ວນບຸນໃຫ້ນັ້ນເອງ
ວິບາກຄື ອາຫານ ເຄື່ອງນຸ່ງຫົ່ມ ແລະນ້ຳດື່ມ
ກໍເກີດຂຶ້ນແກ່ນາງເຜດນັ້ນ ນີ້ເປັນຜົນແຫ່ງທັກຂິນາ

[໑໗໙] ທັນໃດນັ້ນ ນາງເຜດມີຮ່າງກາຍບໍລິສຸດ ນຸ່ງຜ້າສະອາດ

ນຸ່ງຫົ່ມຜ້າເນື້ອດີກວ່າຜ້າແຄວ້ນກາສີ
ມີພັດສະຕາພອນແລະເຄື່ອງປະດັບວິຈິດງົດງາມ ເຂົ້າໄປຫາສາມີ
(ນັນທິເສນອຸປາສົກຖາມວ່າ)

[໑໘໐] ເທບທິດາ ທ່ານມີຜິວພັນງາມຍິ່ງ
ເປັ່ງຣັດສະໝີສະຫວ່າງສະໄຫວໄປທົ່ວທຸກທິດ
ສະຖິດຢູ່ຄືດາວປະກາຍພຶກ

[໑໘໑] ຍ້ອນບຸນອັນໃດທ່ານຈຶ່ງມີຜິວພັນງາມແນວນີ້
ຜົນອັນເພິ່ງປາຖະໜາຈຶ່ງສຳເລັດແກ່ທ່ານໃນບ່ອນນີ້
ແລະໂພຄະທັງມວນລ້ວນໜ້າພໍໃຈຈຶ່ງເກີດຂຶ້ນແກ່ທ່ານ

[໑໘໒] ເທບທິດາຜູ້ມີອານຸພາບຫຼາຍ ຜູ້ຂ້າຂໍຖາມວ່າ
ສະໄໝເມື່ອທ່ານເກີດເປັນມະນຸດໄດ້ເຮັດບຸນອັນໃດໄວ້
ຍ້ອນບຸນອັນໃດທ່ານຈຶ່ງມີອານຸພາບຮຸ່ງເຮືອງ
ແລະມີຣັດສະໝີກາຍສະຫວ່າງສະໄຫວໄປທົ່ວທຸກທິດແນວນີ້

(ນັນທາເທບທິດາຕອບວ່າ)

[໑໘໓] ທ່ານນັນທິເສນອຸປາສົກ ແຕ່ກ່ອນຜູ້ຂ້າຊື່ນັນທາ
ເປັນພັນລະຍາຂອງທ່ານ ຍ້ອນເຮັດກຳຊົ່ວໄວ້
ຈຶ່ງຕ້ອງຈາກໂລກນີ້ໄປສູ່ເປຕະໂລກ

[໑໘໔] ຜູ້ຂ້າບັນເທິງຢູ່ຍ້ອນທານທີ່ທ່ານອຸທິດໃຫ້ແລ້ວ
ຈຶ່ງບໍ່ມີໄພແຕ່ບ່ອນໃດ ທ່ານຄະຫະບໍດີ
ຂໍທ່ານພ້ອມດ້ວຍໝູ່ຍາດທຸກຄົນຈົ່ງມີອາຍຸຍືນຍາວເທີ້ນ
ຈົ່ງເຂົ້າເຖິງສະຖານທີ່ທີ່ບໍ່ມີຄວາມເສົ້າໂສກ
ປາສະຈາກທຸລີ ມີຄວາມສຸກສະບາຍເຊິ່ງເປັນບ່ອນຢູ່ຂອງທ້າວວະສະວັດດີ

[໑໘໕] ທ່ານຄະຫະບໍດີ ທ່ານປະພຶດທຳ ໃຫ້ທານໃນໂລກນີ້
ກຳຈັດມົນທິນຄືຄວາມຂີ້ຖີ່ພ້ອມທັງເຫດໄດ້ແລ້ວ
ບໍ່ມີໃຜຕຳໜິຕິຕຽນໄດ້ ຈົ່ງເຂົ້າເຖິງໂລກສະຫວັນ

**ນັນທາເປຕີວັດຖຸທີ ໔ ຈົບ**

# ໕. ມັດຖະກຸນທະລີເປຕະວັດຖຸ

## ເລື້ອງມັດຖະກຸນທະລີເຜດຜູ້ເຮັດໃຈໃຫ້ເຫຼື້ອມໃສໃນພຣະພຸດທະເຈົ້າກ່ອນສິ້ນໃຈ

(ພາມຖາມວ່າ)

[໑໗໖] ເຈົ້າປະດັບຕົກແຕ່ງຮ່າງກາຍ ໃສ່ຕຸ້ມຫູກັ່ງງ
ທັດຊົງດອກໄມ້ ມີກາຍລູບທາດ້ວຍຈຸນແກ່ນຈັນແດງ
ປະຄອງແຂນຮ່ຳໄຮຢູ່ກາງປ່າ
ເຈົ້າເປັນທຸກເລື້ອງອັນໃດ
(ມັດຖະກຸນທະລີເທບພະບຸດຕອບວ່າ)

[໑໗໗] ເຮືອນລົດທີ່ເຮັດດ້ວຍຄຳ
ງາມຜຸດຜ່ອງເກີດຂຶ້ນແກ່ເຮົາ
ເຮົາຍັງຫາລໍ້ລົດທັງຄູ່ນັ້ນບໍ່ໄດ້
ຍ້ອນຄວາມທຸກນັ້ນ ເຮົາຈັກຍອມສະລະຊີວິດ

(ພາມກ່າວວ່າ)

[໑໗໘] ມານົບຜູ້ຈະເລີນ ເຈົ້າຍາກໄດ້ລໍ້ຄຳ ລໍ້ແກ້ວມະນີ
ລໍ້ທອງແດງ ຫຼືລໍ້ເງິນ ຈົ່ງບອກເຮົາມາ
ເຮົາຈະຈັດລໍ້ທັງຄູ່ໃຫ້ເຈົ້າ

[໑໗໙] ມານົບນັ້ນກ່າວແກ່ພາມນັ້ນວ່າ
ດວງຈັນແລະດວງອາທິດທັງສອງຍ່ອມຜາກົດໃນທ້ອງຟ້ານັ້ນ
ລົດຄຳຂອງເຮົາຍ່ອມງາມດ້ວຍລໍ້ທັງຄູ່ນັ້ນ

(ພາມກ່າວວ່າ)

[໑໘໐] ມານົບ ເຈົ້າໂງ່ແທ້ ທີ່ມາປາຖະໜາສິ່ງທີ່ບໍ່ຄວນປາຖະໜາ
ເຮົາເຂົ້າໃຈວ່າ ເຈົ້າຈັກຕາຍສາກ່ອນ
ຍ້ອນບໍ່ມີທາງທີ່ຈະໄດ້ດວງຈັນແລະດວງອາທິດເລີຍ

(ມານົບກ່າວວ່າ)

[໑໘໑] ແມ່ນການໂຄຈອນໄປມາຂອງດວງຈັນແລະດວງອາທິດກໍຍັງຜາກົດຢູ່

ຣັດສະໝີກໍຍັງຜາກົດຢູ່ໃນວິຖີທັງສອງ
ສ່ວນຄົນທີ່ຕາຍລ່ວງລັບໄປແລ້ວຍ່ອມບໍ່ຜາກົດ
ເຮົາທັງສອງຜູ້ຮ້ອງໄຫ້ຮ່ຳໄຮຢູ່ໃນບ່ອນນີ້ ໃຜນໍໂງ່ກວ່າກັນ

(ພານກ່າວວ່າ)

[໑໙໒] ມານົບ ເຈົ້າເວົ້າຈິງແທ້ ເຮົາທັງສອງຜູ້ຮ້ອງໄຫ້ຮ່ຳໄຮຢູ່
ເຮົານີ້ແລ້ວໂງ່ກວ່າ ມາປາຖະໜາເຖິງຄົນທີ່ຕາຍລ່ວງລັບໄປແລ້ວ
ຄືເດັກອ່ອນຮ້ອງໄຫ້ຢາກໄດ້ດວງຈັນ

[໑໙໓] ເຈົ້າມາຊ່ອຍຫົດເຮົາຜູ້ຮ້ອນຮົນໃຫ້ສະງົບ
ດັບຄວາມກະວົນກະວາຍທັງໝົດ
ຄືຄົນໃຊ້ນ້ຳຫົດມອດໄຟທີ່ໄໝ້ໄຂງົວ

[໑໙໔] ເຈົ້າບັນເທົາຄວາມໂສກເສົ້າເຖິງບຸດຂອງເຮົາຜູ້ກຳລັງເສົ້າໂສກ
ຊື່ວ່າໄດ້ຊ່ອຍຖອນລູກສອນຄືຄວາມໂສກ
ເຊິ່ງສຽບທີ່ຫົວໃຈຂອງເຮົາອອກໄດ້ແລ້ວນໍ

[໑໙໕] ມານົບ ເຮົາເຊິ່ງເຈົ້າຊ່ອຍຖອນລູກສອນຄືຄວາມໂສກຂຶ້ນໃຫ້ແລ້ວ
ເຢັນສະງົບແລ້ວ ຈະບໍ່ເສົ້າໂສກ ບໍ່ຮ້ອງໄຫ້ ຍ້ອນໄດ້ຟັງຄຳຂອງເຈົ້າ

(ພານເມື່ອຈະຖາມຕໍ່ໄປ ຈຶ່ງກ່າວວ່າ)

[໑໙໖] ເຈົ້າເປັນເທວະດາຫຼືຄົນທັນ ຫຼືເປັນທ້າວສັກກະປຸຣິນທະທະ[១]
ເຈົ້າເປັນໃຜ ຫຼືເປັນບຸດຂອງໃຜ
ເຮົາຈະຮູ້ຈັກເຈົ້າໄດ້ແນວໃດ

(ມານົບເປີດເຜີຍຕົນແກ່ພານນັ້ນວ່າ)

[໑໙໗] ທ່ານເອງເຜົາບຸດທີ່ປ່າຊ້າແລ້ວ
ຮ່ຳໄຮຮ້ອງໄຫ້ເຖິງບຸດຄົນໃດ
ບຸດຄົນນັ້ນຄືເຮົາເຊິ່ງເຮັດກຸສົນກຳແລ້ວ
ເຖິງຄວາມເປັນສະຫາຍຂອງທວຍເທບຊັ້ນຕາວະຕິງສາ

(ພານຖາມວ່າ)

[໑໙໗] ເມື່ອເຈົ້າໃຫ້ທານໜ້ອຍຫຼືຫຼາຍໃນເຮືອນຂອງຕົນ
ຫຼືຮັກສາອຸໂປສົດກຳເຊັ່ນນັ້ນ ເຮົາບໍ່ໄດ້ເຫັນ
ຍ້ອນເຮັດກຳອັນໃດໄວ້ເຈົ້າຈຶ່ງໄປເທວະໂລກໄດ້

(ມານົບຕອບວ່າ)

[໑໙໙] ເຮົາປ່ວຍເປັນໄຂ້ ໄດ້ຮັບທຸກ
ມີກາຍກະສັບກະສ່າຍຢູ່ໃນບ່ອນຢູ່ຂອງຕົນ
ໄດ້ເຫັນພຣະສຳມາສຳພຸດທະເຈົ້າຜູ້ປາສະຈາກກິເລດດັ່ງທຸລີ
ຊົງຂ້າມພົ້ນຄວາມສົງໄສ ສະເດັດໄປດີແລ້ວ ມີພຣະປັນຍາບໍ່ຕ່ຳຊາມ

[໒໐໐] ເຮົານັ້ນມີໃຈເບີກບານ ມີຈິດເຫຼື້ອມໃສ
ໄດ້ທຳອັນຊະລີກຳແດ່ພຣະຕະຖາຄົດ
ເຮົາເມື່ອເຮັດກຸສົນກຳນັ້ນແລ້ວ
ໄດ້ເກີດຮ່ວມກັບໝູ່ເທບຊັ້ນຕາວະຕິງສາ

(ພານກ່າວວ່າ)

[໒໐໑] ໜ້າອັດສະຈັນຈິງ ບໍ່ເຄີຍມີມາແລ້ວນໍ
ອັນຊະລີກຳມີຜົນເປັນໄດ້ເຖິງປານນີ້
ແມ່ນເຮົາກໍມີໃຈເບີກບານ ມີຈິດເຫຼື້ອມໃສ
ຈຶ່ງຂໍເຖິງພຣະພຸດທະເຈົ້າເປັນບ່ອນເພິ່ງບ່ອນຮະນຶກໃນມື້ນີ້ນີ້ເອງ

(ມານົບກ່າວວ່າ)

[໒໐໒] ທ່ານຈົ່ງມີຈິດເຫຼື້ອມໃສ
ເຖິງພຣະພຸດທະເຈົ້າ ພຣະທຳ ແລະພຣະສົງ
ເປັນບ່ອນເພິ່ງບ່ອນຮະນຶກໃນມື້ນີ້ນີ້ແລ້ວ
ອັນໜຶ່ງ ທ່ານຈົ່ງສະມາທານສິກຂາບົດ ໕ ຢ່າໃຫ້ຂາດແລະດ່າງພ້ອຍ

[໒໐໓] ຄື ຈົ່ງຟ້າວງົດເວັ້ນຈາກການຂ້າສັດ
ເວັ້ນຂາດຈາກການຖືເອົາສິ່ງຂອງທີ່ເຈົ້າຂອງບໍ່ໄດ້ໃຫ້ໃນໂລກ
ຍິນດີສະເພາະພັນລະຍາຂອງຕົນ
ຢ່າກ່າວຕົວະ ຢ່າດື່ມນ້ຳເມົາ

(ພາມກ່າວວ່າ)

[໔໐໔] ເທວະດາຜູ້ໜ້າບູຊາ ທ່ານເປັນຜູ້ມຸ້ງປະໂຫຍດເກື້ອກູນແກ່ຜູ້ຂ້າ
ຜູ້ຂ້າຈະເຮັດຕາມຄຳຂອງທ່ານ
ທ່ານເປັນອາຈານຂອງຜູ້ຂ້າ

[໔໐໕] ຜູ້ຂ້າຂໍເຖິງພຣະພຸດທະເຈົ້າ
ເຊິ່ງເປັນຜູ້ປະເສີດກວ່າເທວະດາແລະມະນຸດ
ພຣະທຳອັນປະເສີດ ແລະພຣະສົງວ່າເປັນບ່ອນເພິ່ງບ່ອນຣະນຶກ

[໔໐໖] ຜູ້ຂ້າຈະຟ້າວງົດເວັ້ນຈາກການຂ້າສັດ
ເວັ້ນຂາດຈາກການຖືເອົາສິ່ງຂອງທີ່ເຈົ້າຂອງບໍ່ໄດ້ໃຫ້ໃນໂລກ
ຍິນດີສະເພາະພັນລະຍາຂອງຕົນ
ບໍ່ກ່າວຕົວະ ບໍ່ດື່ມນ້ຳເມົາ

**ມັດຖະກຸນທະລິເປຕະວັດຖຸທີ ໕ ຈົບ**

## ໖. ກັນທະເປຕະວັດຖຸ

## ເລື້ອງເຜດກັນທະໂຄດ

(ໂຣຫິໄນຍະອຳມາດຂາບທູນວ່າ)

[໔໐໗] ພຣະອົງຜູ້ກັນທະໂຄດ[๑] ຂໍພຣະອົງສະເດັດລຸກຂຶ້ນເທີ້ນ
ຈະມົວບັນທົມຢູ່ເຮັດຫຍັງ
ຈະມີປະໂຫຍດອັນໃດຕໍ່ພຣະອົງດ້ວຍການບັນທົມຢູ່ນໍ
ພຣະເກສະວະ (ບັດນີ້) ພຣະພາດາຮ່ວມພຣະອຸທອນຂອງພຣະອົງ
ເຊິ່ງເປັນດັ່ງພຣະຫະໄທແລະໄນຍະເນດເບື້ອງຂວາຂອງພຣະອົງ
ຊົງມີລົມກຳເຣິບ ເພີ້ຄັ່ງຢູ່

[໔໐໘] ພຣະເຈົ້າເກສະວະຊົງສະດັບຄຳຂອງໂຣຫິໄນຍະອຳມາດນັ້ນແລ້ວ
ໄດ້ຊົງອຶດອັດຍ້ອນຄວາມໂສກເຖິງພຣະພາດາ
ຈຶ່ງຟ້າວສະເດັດລຸກຂຶ້ນທັນທີ

(ຊົງຈັບມືທັງສອງຂອງຄະຕິບັນດິດໄວ້ໝັ້ນ ເມື່ອຈະຊົງປາໄສ ຈຶ່ງຕັດວ່າ)

[໔໐໗] ເຫດໃດນໍ ທ່ານຈຶ່ງເປັນດັ່ງຄົນບ້າ
ທ່ຽວຈົ່ມເພີ້ຢູ່ທົ່ວພຣະນະຄອນທະວາຣະກະນີ້ ວ່າ
ກະຕ່າຍ ໆ ທ່ານຕ້ອງການກະຕ່າຍແນວໃດ

[໔໑໐] ເຮົາຈັກໃຫ້ນາຍຊ່າງເຮັດກະຕ່າຍຄຳ ກະຕ່າຍແກ້ວມະນີ
ກະຕ່າຍໂລຫະ ກະຕ່າຍເງິນ ກະຕ່າຍຫອຍສັງ
ກະຕ່າຍສີລາ ກະຕ່າຍແກ້ວປະພານ ໃຫ້ທ່ານ

[໔໑໑] ແມ່ນກະຕ່າຍອື່ນ ໆ ທີ່ທ່ຽວຫາກິນຢູ່ໃນປ່າຍັງມີຢູ່
ເຮົາຈັກໃຫ້ນຳກະຕ່າຍແມ່ນເຫຼົ່ານັ້ນມາໃຫ້ທ່ານ
ທ່ານຕ້ອງການກະຕ່າຍແນວໃດ

(ຄະຕິບັນດິດຂາບທູນວ່າ)

[໔໑໒] ຂ້າພຣະອົງບໍ່ຕ້ອງການກະຕ່າຍທີ່ຢູ່ເທິງແຜ່ນດິນ
ຂ້າພຣະອົງຕ້ອງການກະຕ່າຍຈາກດວງຈັນ
ພຣະເກສະວະ ຂໍພຣະອົງໄດ້ຊົງພຣະກະລຸນາ
ໂຜດນຳກະຕ່າຍນັ້ນລົງມາປະທານແກ່ຂ້າພຣະອົງເທີ້ນ

(ພຣະເຈົ້າວາສຸເທບຕັດວ່າ)

[໔໑໓] ດູຣາພຣະຍາດ ທ່ານຈັກລະຊີວິດທີ່ປະເສີດຍິ່ງແນ່ນອນ
ຍ້ອນທ່ານຕ້ອງການກະຕ່າຍຈາກດວງຈັນ
ຊື່ວ່າປາຖະໜາສິ່ງທີ່ບໍ່ໜ້າປາຖະໜາ

(ຄະຕິບັນດິດຂາບທູນວ່າ)

[໔໑໔] ພຣະອົງຜູ້ກັນຫະໂຄດ ຫາກພຣະອົງຊົງຮູ້
ຕາມທີ່ພຣະອົງຊົງພ່ຳສອນບຸກຄົນອື່ນ
ເປັນຫຍັງ ພຣະອົງຈຶ່ງຊົງກັນແສງເຖິງພຣະຣາດຊະໂອຣົດ
ທີ່ທິວົງຄົດໄປຕັ້ງດົນ ຈົນເຖິງມື້ນີ້ນໍ

[໔໑໕] ມະນຸດຫຼືອະມະນຸດບໍ່ເພິ່ງໄດ້ຕາມປາຖະໜາວ່າ
ຂໍບຸດຂອງເຮົາຜູ້ເກີດມາແລ້ວຢ່າຕາຍເລີຍ
ພຣະອົງຈະຊົງໄດ້ພຣະຣາດຊະໂອຣົດທີ່ທິວົງຄົດແລ້ວ

ເຊິ່ງບໍ່ຄວນໄດ້ແຕ່ບ່ອນໃດ

[໔໑໖] ພຣະອົງຜູ້ກັນທະໂຄດ ພຣະອົງບໍ່ອາດຈະນຳພຣະຣາດຊະໂອຣົດ
ຜູ້ທີວົງຄົດແລ້ວ ທີ່ພຣະອົງຊົງກັນແສງເຖິງມາໄດ້ດ້ວຍມົນ
ດ້ວຍຢາສະມຸນໄພຫຼືຊັບໄດ້

[໔໑໗] ແມ່ນຊົນທັງຫຼາຍທີ່ມີຊັບຫຼາຍ ມີໂພຄະສົມບັດຫຼາຍ
ເຖິງຈະເປັນກະສັດຜູ້ຄອງແຄວ້ນ
ມີຊັບແລະທັນຍາຫານຫຼວງຫຼາຍ ຈະບໍ່ແກ່ຕາຍກໍບໍ່ມີ

[໔໑໘] ແມ່ນເຫຼົ່າຊົນທີ່ເປັນກະສັດ ພາມ ແພດ ສູດ
ຈັນທານ ປຸກກຸສະ ແລະຊົນປະເພດອື່ນ ໆ
ຜູ້ມີຄວາມເກີດຂອງຕົນເປັນເຫດ ຈະບໍ່ແກ່ບໍ່ຕາຍກໍບໍ່ມີ

[໔໑໙] ແມ່ນເຫຼົ່າຊົນຜູ້ຈົ່ມມົນພົມຈິນດາມີອົງ ໖
ແລະເຫຼົ່າຊົນທີ່ໃຊ້ວິຊາອື່ນ ໆ
ຈະບໍ່ແກ່ບໍ່ຕາຍ ກໍບໍ່ມີ

[໔໒໐] ອັນໜຶ່ງ ແມ່ນລືສີທັງຫຼາຍຜູ້ສະງົບ ສັງລວມ ພໍ່າເພັງຕະບະ
ກໍຍັງຕ້ອງລະຖິ້ມຮ່າງກາຍໄປຕາມການອັນສົມຄວນ

[໔໒໑] ແມ່ນພຣະອະຣະຫັນທັງຫຼາຍຜູ້ອົບຮົມຕົນແລ້ວ ເຮັດກິດສຳເລັດແລ້ວ
ບໍ່ມີອາສະວະ ສິ້ນບຸນແລະບາບ
ກໍຍັງຕ້ອງປະຖິ້ມຮ່າງກາຍນີ້ໄປ

(ພຣະເຈົ້າວາສຸເທບຕັດວ່າ)

[໔໒໒] ທ່ານມາຊ່ອຍຫົດເຮົາຜູ້ຮ້ອນຮົນໃຫ້ສະງົບ
ດັບຄວາມກະວົນກະວາຍທັງໝົດ
ຄືຄົນໃຊ້ນ້ຳຫົດມອດໄຟທີ່ໄໝ້ໄຂງົວ

[໔໒໓] ທ່ານບັນເທົາຄວາມໂສກເສົ້າເຖິງບຸດຂອງເຮົາຜູ້ກຳລັງເສົ້າໂສກ
ຊື່ວ່າໄດ້ຊ່ອຍຖອນລູກສອນຄືຄວາມໂສກ
ເຊິ່ງສຽບທີ່ຫະໄທຂອງເຮົາອອກໄດ້ແລ້ວນໍ

[໔໒໔] ເຮົາຜູ້ເຊິ່ງທ່ານຊ່ອຍຖອນລູກສອນຄືຄວາມໂສກຂຶ້ນໄດ້ແລ້ວ

ເຢັນ ສະງົບແລ້ວ ຈະບໍ່ເສົ້າໂສກ ບໍ່ຮ້ອງໄຫ້
ຍ້ອນໄດ້ຟັງຄຳຂອງທ່ານ

[໔໔໕] ຊົນເຫຼົ່າໃດເປັນຜູ້ອະນຸເຄາະ ຊົນເຫຼົ່ານັ້ນເປັນຄົນມີປັນຍາ
ຍ່ອມເຮັດແນວນີ້ ຍ່ອມຊ່ອຍກັນແລະກັນໃຫ້ຫາຍຈາກຄວາມໂສກເສົ້າ
ຄືຄະຕິບັນດິດຊ່ອຍພຣະເຊດຖະພາດາ(ອ້າຍ)ໃຫ້ຫາຍຈາກຄວາມໂສກເສົ້າ

[໔໔໖] ພວກອຳມາດຜູ້ຖວາຍການຮັບໃຊ້ຂອງພຣະຣາຊາພຣະອົງໃດ
ຍ່ອມເປັນແນວນີ້ ຍ່ອມແນະນຳດ້ວຍສຸພາສິດ
ຄືຄະຕິບັນດິຕແນະນຳພຣະເຊດຖະພາດາຂອງຕົນ

**ກັນທະເປຕະວັດຖຸທີ ໖ ຈົບ**

## ໗. ທະນະປາລະເສດຖີເປຕະວັດຖຸ

## ເລື້ອງທະນະປານເສດຖີເຜດ

(ພວກພໍ່ຄ້າຖາມເຜດຕົນໜຶ່ງວ່າ)

[໔໔໗] ແນ່ະສະຫາຍ ທ່ານເປືອຍກາຍ
ມີຜິວພັນແແລະຮູບຮ່າງໜ້າກຽດຊັງເປັນຕາຍ້ານ
ຈ່ອຍແຫ້ງ ມີຮ່າງກາຍສະພັ່ງໄປດ້ວຍເສັ້ນເອັນ
ມີແຕ່ກະດູກຂ້າງສຽບຂຶ້ນ ມີຮ່າງກາຍຈ່ອຍແຫ້ງ
ທ່ານເປັນໃຜກັນນໍ

(ເຜດນັ້ນຕອບວ່າ)

[໔໔໘] ຜູ້ຈະເລີນທັງຫຼາຍ ເຮົາເກີດເປັນເຜດໃນຍົມມະໂລກ
ໄດ້ຮັບຄວາມລຳບາກ ຍ້ອນເຮັດກຳຊົ່ວໄວ້
ຈຶ່ງຕ້ອງຈາກໂລກນີ້ໄປສູ່ເປຕະໂລກ

(ພວກພໍ່ຄ້າຖາມວ່າ)

[໔໔໙] ທ່ານໄດ້ເຮັດກຳຊົ່ວທາງກາຍ ວາຈາ ໃຈອັນໃດໄວ້ນໍ
ຍ້ອນຜົນກຳອັນໃດ ທ່ານຈຶ່ງຕ້ອງຈາກໂລກນີ້ໄປສູ່ເປຕະໂລກ

(ເຜດນັ້ນຕອບວ່າ)

[໔໖໐]　ມີພຣະນະຄອນຂອງພຣະເຈົ້າທະສັນນະຣາດ ຜາກົດຊື່ວ່າ ເອຣະກັດສະ
ແຕ່ກ່ອນເຮົາເປັນເສດຖີຢູ່ໃນນະຄອນນັ້ນ
ຊົນທັງຫຼາຍຮຽກເຮົາວ່າ ທະນະປານເສດຖີ

[໔໖໑]　ເຮົາມີເງິນ ໗໐ ເຫຼັ້ມກວຽນ ຄໍາ
ແກ້ວມຸກດາ ແກ້ວໄພທູນ ກໍມີຫຼວງຫຼາຍ

[໔໖໒]　ແມ່ນເຮົາຈະມີຊັບຫຼວງຫຼາຍເຖິງພຽງນັ້ນ
ກໍບໍ່ພໍໃຈທີ່ຈະໃຫ້ທານ ອັດປະຕູເຮືອນແລ້ວ ຈຶ່ງບໍຣິໂພກອາຫານ
ດ້ວຍຄິດວ່າ ພວກຍາຈົກຢ່າໄດ້ເຫັນເຮົາ

[໔໖໓]　ເຮົາບໍ່ມີສັດທາ ເປັນຄົນຂີ້ຖີ່ ກະດ້າງ
ໄດ້ດ່າພວກຄົນທີ່ໃຫ້ທານ ເຮັດບຸນ
ແລະຫ້າມຊົນເປັນຈໍານວນຫຼາຍທີ່ໃຫ້ທານເຮັດບຸນ

[໔໖໔]　ດ້ວຍຄໍາວ່າ ຜົນແຫ່ງທານບໍ່ມີ
ຜົນແຫ່ງຄວາມສັງລວມຈັກມີແຕ່ບ່ອນໃດ
ຈຶ່ງທໍາລາຍສະນໍ້າ ນໍ້າສ້າງ ທີ່ເຂົາຂຸດໄວ້
ທໍາລາຍສວນດອກໄມ້ ສວນໝາກໄມ້ ສາລານໍ້າດື່ມ
ແລະຂົວໃນບ່ອນຍ່າງລໍາບາກໃຫ້ພິນາດ

[໔໖໕]　ເຮົານັ້ນບໍ່ໄດ້ທໍາຄວາມດີ ເຮັດແຕ່ຄວາມຊົ່ວໄວ້
ເຄື່ອນຈາກມະນຸດສາໂລກນັ້ນແລ້ວຈຶ່ງເກີດໃນແດນເຜດ
ມີແຕ່ຄວາມຫິວກະຫາຍ

[໔໖໖]　ຕະຫຼອດ ໕໐ ປີ ຕັ້ງແຕ່ເຮົາຕາຍແລ້ວ
ຍັງບໍ່ໄດ້ກິນເຂົ້າແລະດື່ມນໍ້າເລີຍ

[໔໖໗]　ຄວາມຫວງແຫນຊັບເປັນຄວາມພິນາດ
ຄວາມພິນາດກໍຄືຄວາມຫວງແຫນຊັບ
ໄດ້ຂ່າວວ່າ ເຜດທັງຫຼາຍກໍຮູ້ວ່າຄວາມຫວງແຫນຊັບເປັນຄວາມພິນາດ

[໔໖໘]　ເມື່ອຊາດກ່ອນ ເຮົາຫວງແຫນຊັບ

ເມື່ອຊັບມີຢູ່ເປັນຈຳນວນຫຼາຍກໍບໍ່ໄດ້ໃຫ້ທານ
ເມື່ອວັດຖຸທານມີຢູ່ກໍບໍ່ໄດ້ເຮັດທີ່ເພິ່ງແກ່ຕົນ
ເຮົານັ້ນໄດ້ຮັບຜົນກຳຂອງຕົນ ຈຶ່ງເດືອດຮ້ອນໃນພາຍຫຼັງ

[໔໓໙] ພົ້ນຈາກ ໔ ເດືອນໄປແລ້ວ ເຮົາຈັກຕາຍ
ຈັກຕົກນະຮົກອັນຮ້ອນຮົນແສນສາຫັດ

[໔໔໐] ນະຮົກນັ້ນມີ ໔ ຫຼ່ຽມ ມີປະຕູ ໔ ດ້ານ
ກຳສ້າງຈຳແນກໄວ້ເປັນສ່ວນ ໆ
ອ້ອມຮອບດ້ວຍກຳແພງເຫຼັກ ຄອບໄວ້ດ້ວຍແຜ່ນເຫຼັກ

[໔໔໑] ພື້ນນະຮົກນັ້ນລ້ວນເປັນເຫຼັກແດງລຸກເປັນແປວເພີງ
ປະກອບດ້ວຍຄວາມຮ້ອນ ແຜ່ໄປຮອບຕະຫຼອດຮ້ອຍໂຍດຢູ່ຕະຫຼອດການ

[໔໔໒] ເຮົາຈັກຕ້ອງສະເຫວີຍທຸກຂະເວທະນາໃນມະຫານະຮົກນັ້ນຍາວນານ
ດ້ວຍວ່າການສະເຫວີຍທຸກແນວນີ້ເປັນຜົນກຳຊົ່ວ
ຍ້ອນແນວນັ້ນເຮົາຈຶ່ງເສົ້າໂສກຢ່າງໜັກ

[໔໔໓] ດ້ວຍເຫດນີ້ ເຮົາຂໍເຕືອນທ່ານທັງຫຼາຍ
ຂໍຄວາມຈະເລີນຈົ່ງມີແກ່ທ່ານທັງຫຼາຍຜູ້ມາປະຊຸມກັນໃນບ່ອນນີ້
ພວກທ່ານຢ່າໄດ້ເຮັດກຳຊົ່ວທັງໃນກາງແຈ້ງຫຼືບ່ອນລັບ

[໔໔໔] ຖ້າພວກທ່ານຈັກເຮັດກຳຊົ່ວນັ້ນຫຼືກຳລັງເຮັດຢູ່
ແມ່ນພວກທ່ານຈະເຫາະໜີໄປກໍບໍ່ພົ້ນຈາກທຸກໄດ້

[໔໔໕] ຂໍທ່ານທັງຫຼາຍຈົ່ງເກື້ອກູນມານດາ ຈົ່ງເກື້ອກູນບິດາ
ປະພຶດອ່ອນນ້ອມຕໍ່ທ່ານຜູ້ໃຫຍ່ໃນສະກຸນ
ເປັນຜູ້ເກື້ອກູນສະມະນະ ເກື້ອກູນພາມ
ດ້ວຍການປະຕິບັດແນວນີ້ ທ່ານທັງຫຼາຍຈັກໄປສູ່ສະຫວັນ

**ທະນະປາລະກະເສດຖີເປຕະວັດຖຸທີ ໗ ຈົບ**

# ໗. ຈູລະເສດຖີເປຕະວັດຖຸ

## ເລື່ອງຈູລະເສດຖີເຜດ

(ພຣະເຈົ້າອະຊາດສັດຕູຕັດຖາມເຜດນັ້ນວ່າ)

[໔໔໖] ທ່ານຜູ້ຈະເລີນທ່ານເປັນນັກບວດເປືອຍກາຍຈ່ອຍແຫ້ງ
ຍ້ອນຜົນກຳອັນໃດ ທ່ານຈຶ່ງໄປຢູ່ໄສ ໆ ສະເພາະກາງຄືນ
ຂໍທ່ານຈົ່ງບອກເຫດທີ່ມາແກ່ຂ້າພະເຈົ້າເທີ້ນ
ບາງເທື່ອຂ້າພະເຈົ້າອາດມອບຊັບເຄື່ອງພໍໃຈຈາກໂພຄະທັງປວງໃຫ້ແກ່ທ່ານ

(ເຜດນັ້ນຕອບວ່າ)

[໔໔໗] (ເມື່ອຊາດກ່ອນ) ພຣະນະຄອນພາຣານະສີມີກິດຕິຄຸນເລື່ອງລືໄປໄກ
ຂ້າພຣະອົງເປັນຄະຫະບໍດີຜູ້ຮັ່ງມີຢູ່ໃນພຣະນະຄອນນັ້ນ
ແຕ່ເປັນຄົນມີຈິດຊາມ ບໍ່ເຄີຍໃຫ້ສິ່ງຂອງແກ່ໃຜ
ມີໃຈຂ້ອງຢູ່ໃນອາມິດ ໄດ້ຕົກໄປເຖິງວິໄສແຫ່ງພະຍາຍົມຍ້ອນເປັນຜູ້ທຸສິນ

[໔໔໘] ຍ້ອນບາບກຳເຫຼົ່ານັ້ນ
ຂ້າພຣະອົງນັ້ນຈຶ່ງລຳບາກເນື່ອງຈາກຖືກຄວາມຫິວສຽດແທງ
ຍ້ອນຄວາມທຸກອັນເກີດແຕ່ຄວາມຫິວນັ້ນແລ
ຂ້າພຣະອົງປາຖະໜາອາມິດ ຈຶ່ງໄດ້ມາຫາໝູ່ຍາດ
ມະນຸດແມ່ນເຫຼົ່າອື່ນມີປົກກະຕິບໍ່ໃຫ້ທານ
ແລະບໍ່ເຊື່ອວ່າຜົນແຫ່ງທານມີຢູ່ໃນປະຣະໂລກ

[໔໔໙] ທິດາຂອງຂ້າພຣະອົງເວົ້າຢູ່ສະເໝີວ່າ
ເຮົາຈັກໃຫ້ທານອຸທິດບິດາ ມານດາ ບັນພະບຸລຸດ ຢ່າ ຕາ ຍາຍ
ພວກພາມບໍຣິໂພກ ທານທີ່ນາງຈັດແຈງແລ້ວ
ຂ້າພຣະອົງຈະໄປສູ່ເມືອງອັນທະກະວິນທະເພື່ອບໍຣິໂພກອາຫານ

[໔໕໐] ພຣະຣາຊາຈຶ່ງຕັດສັ່ງກັບເຂົາວ່າ ຖ້າທ່ານໄປໄດ້ສະເຫວີຍຜົນທານແມ່ນນັ້ນ
ເພິ່ງຟ້າວກັບມາບອກເຫດທີ່ມີຈິງແກ່ຂ້າພະເຈົ້າ
ຂ້າພະເຈົ້າຟັງຄຳມີເຫດຜົນອັນຄວນເຊື່ອຖືໄດ້ແລ້ວ ຈັກເຮັດສັກກາຣະບູຊາຄືກັນ

[໔໕໑] ເຜດຈູລະເສດຖີຮັບພຣະດຳຣັດແລ້ວ ໄດ້ໄປສູ່ເມືອງອັນທະກະວິນທະນັ້ນ

(ແຕ່ບໍ່ໄດ້ຮັບຜົນແຫ່ງທານນັ້ນ)
ຍ້ອນພາມທັງຫຼາຍທີ່ບໍຣິໂພກພັດ
ເປັນຜູ້ບໍ່ມີສິນ ບໍ່ຄວນແກ່ທັກຂິນາ
ພາຍຫຼັງ ເຜດຈູລະເສດຖີກັບມາເມືອງຣາດຊະຄືອີກ
ໄດ້ສະແດງກາຍໃຫ້ຜາກົດສະເພາະພຣະພັກ
ຂອງພຣະເຈົ້າອະຊາດສັດຕູຜູ້ເປັນໃຫຍ່ກວ່າໝູ່ຊົນ

[໔໕໔] ພຣະຣາຊາທອດພຣະເນດເຫັນເຜດນັ້ນກັບມາອີກ
ຈຶ່ງຕັດຖາມວ່າ ຂ້າພະເຈົ້າຈະໃຫ້ທານອັນໃດ
ຖ້າເຫດທີ່ຈະເຮັດໃຫ້ທ່ານອີ່ມໜຳຕະຫຼອດການລະນານມີຢູ່
ຂໍທ່ານຈົ່ງບອກເຫດນັ້ນແກ່ຂ້າພະເຈົ້າ

(ຈູລະເສດຖີເຜດຂາບທູນວ່າ)

[໔໕໓] ພຣະຣາຊາ ຂໍພຣະອົງຈົ່ງຊົງອັງຄາດພຣະພຸດທະເຈົ້າ
ແລະພຣະສົງດ້ວຍເຂົ້ານ້ຳແລະຈີວອນ
ແລ້ວຊົງອຸທິດສ່ວນບຸນນັ້ນເພື່ອປະໂຫຍດເກື້ອກູນແກ່ຂ້າພຣະອົງ
ດ້ວຍຊົງພ່ຳເພັງກິດແນວນີ້
ຂ້າພຣະອົງຈະເພິ່ງອີ່ມໜຳຕະຫຼອດການລະນານ

[໔໕໔] ຍ້ອນເຫດນັ້ນ ພຣະຣາຊາຈຶ່ງຟ້າວສະເດັດອອກ
ຊົງຖວາຍທານຫຼວງຫຼາຍແກ່ສົງດ້ວຍພຣະຫັດຂອງພຣະອົງ
ແລ້ວຊົງຂາບທູນເລື້ອງແດ່ພຣະຕະຖາຄົດເຈົ້າ
ແລະຊົງອຸທິດສ່ວນບຸນໃຫ້ແກ່ເຜດນັ້ນ

[໔໕໕] ຈູລະເສດຖີເຜດນັ້ນໄດ້ຮັບການບູຊາແລ້ວ ເປັນຜູ້ງົດງາມຫຼາຍ
ໄດ້ມາຜາກົດສະເພາະພຣະພັກຂອງພຣະຣາຊາແລ້ວຂາບທູນວ່າ
ຂ້າພຣະອົງເປັນເທວະດາຜູ້ມີລິດຢ່າງປະເສີດ
ມະນຸດທັງຫຼາຍຜູ້ມີລິດສະເໝີຄືກັບຂ້າພຣະອົງບໍ່ມີ

[໔໕໖] ຂໍພຣະອົງຊົງທອດພຣະເນດອານຸພາບ
ເຊິ່ງຫາປະມານບໍ່ໄດ້ຂອງຂ້າພຣະອົງນີ້ເທີ້ນ
ທີ່ພຣະອົງຊົງຖວາຍທານຫຼວງຫຼາຍແກ່ສົງ
ອຸທິດແກ່ຂ້າພຣະອົງດ້ວຍຄວາມອະນຸເຄາະ

ພຣະອົງຜູ້ເປັນເທບແຫ່ງມະນຸດ
ຂ້າພຣະອົງເປັນຜູ້ທີ່ພຣະອົງຊົງໃຫ້ອີ່ມໜຳຕະຫຼອດການຢູ່ປະຈຳ
ດ້ວຍວັດຖຸທານຫຼວງຫຼາຍ
ບັດນີ້ ຂ້າພຣະອົງມີຄວາມສຸກແລ້ວ ຈຶ່ງຂໍທູນລາ

**ຈູລະເສດຖີເປຕະວັດຖຸທີ ໗ ຈົບ**

**ພານະວາຣະທີ ໑ ຈົບ**

# ໙. ອັງກຸຣະເປຕະວັດຖຸ

## ເລື້ອງອັງກຸຣະກັບເຜດ

(ພາມພໍ່ຄ້າຄົນໜຶ່ງເຫັນຂອງທິບອອກຈາກມືຣຸກຂະເທວະດາ[1] ຈຶ່ງເກີດຄວາມໂລບຂຶ້ນ ໄດ້ບອກແກ່ອັງກຸຣະພານິດວ່າ)

[໔໕໗] ເຮົາທັງຫຼາຍນຳຊັບທີ່ຫາໄດ້ໄປສູ່ແຄວັ້ນກຳໂພຊະເພື່ອປະໂຫຍດໃດ
ພວກເຮົາຈະນຳເທບພະບຸດຜູ້ໃຫ້ສິ່ງທີ່ເຮົາຕ້ອງການຈະໄດ້ນີ້ໄປເພື່ອປະໂຫຍດນັ້ນ

[໔໕໘] ພວກເຮົາຈະອ້ອນວອນເທບພະບຸດນີ້
ຫຼືບັງຄັບໃຫ້ຂຶ້ນຍານແລ້ວຟ້າວເດີນທາງໄປສູ່ເມືອງທະວາຣະວະດີໂດຍໄວ

(ອັງກຸຣະພານິດເມື່ອຈະຫ້າມພາມພໍ່ຄ້ານັ້ນຈຶ່ງໄດ້ກ່າວຄາຖາວ່າ)

[໔໕໙] ບຸກຄົນອາໄສນັ່ງຫຼືນອນທີ່ຮົ່ມເງົາຂອງຕົ້ນໄມ້ໃດ
ແມ່ນແຕ່ງ່າຂອງຕົ້ນໄມ້ນັ້ນກໍບໍ່ຄວນຫັກ
ຍ້ອນຜູ້ປະທຸດສະຮ້າຍມິດເປັນຄົນຊົ່ວຊາມ

(ພາມພໍ່ຄ້າກ່າວວ່າ)

[໔໖໐] ບຸກຄົນອາໄສນັ່ງຫຼືນອນທີ່ຮົ່ມເງົາຂອງຕົ້ນໄມ້ໃດ
ແມ່ນລຳຕົ້ນຂອງຕົ້ນໄມ້ນັ້ນກໍເພິ່ງຕັດໄດ້ ຖ້າມີຄວາມຕ້ອງການເຊັ່ນນັ້ນ

(ອັງກຸຣະພານິດກ່າວວ່າ)

[໔໖໑] ບຸກຄົນອາໄສນັ່ງຫຼືນອນທີ່ຮົ່ມເງົາຂອງຕົ້ນໄມ້ໃດ
ແມ່ນແຕ່ໃບຂອງຕົ້ນໄມ້ນັ້ນກໍບໍ່ຄວນທຳລາຍ
ຍ້ອນຜູ້ປະທຸດສະຮ້າຍມິດເປັນຄົນຊົ່ວຊາມ

(ພາມພໍ່ຄ້າກ່າວວ່າ)

[໔໖໔] ບຸກຄົນອາໄສນັ່ງຫຼືນອນທີ່ຮົ່ມເງົາຂອງຕົ້ນໄມ້ໃດ
ແມ່ນຕົ້ນໄມ້ນັ້ນພ້ອມທັງຮາກກໍເພິ່ງຖອນໄດ້ ຖ້າມີຄວາມຕ້ອງການເຊັ່ນນັ້ນ

(ອັງກຸຣະພານິດກ່າວວ່າ)

[໔໖໓] ດ້ວຍວ່າບຸຣຸດພັກຢູ່ໃນເຮືອນຂອງບຸຄົນໃດພຽງໜຶ່ງຄືນ
ຫຼືໄດ້ເຂົ້ານ້ຳໃນບ່ອນຢູ່ຂອງບຸກຄົນໃດ ບໍ່ຄວນມີຈິດຄິດຮ້າຍຕໍ່ບຸກຄົນນັ້ນ
ຄວາມເປັນຜູ້ກະຕັນຍູສັດຕະບຸຣຸດທັງຫຼາຍສັນເສີນແລ້ວ

[໔໖໔] ບຸກຄົນເພິ່ງພັກຢູ່ໃນເຮືອນຂອງບຸກຄົນໃດແມ່ນພຽງໜຶ່ງຄືນ
ໄດ້ຮັບບຳລຸງດ້ວຍເຂົ້າແລະນ້ຳ ກໍບໍ່ຄວນມີຈິດຄິດຮ້າຍຕໍ່ບຸກຄົນນັ້ນ
ບຸກຄົນຜູ້ມີມືອັນບໍ່ບຽດບຽນຍ່ອມເຮັດໃຫ້ບຸກຄົນ
ຜູ້ປະທຸດສະຮ້າຍມິດເດືອດຮ້ອນ

[໔໖໕] ບຸກຄົນໃດທຳຄວາມດີໄວ້ໃນການກ່ອນ
ພາຍຫຼັງກັບບຽດບຽນບຸບພະກາຣີຊິນດ້ວຍຄວາມຊົ່ວ
ບຸກຄົນນັ້ນຊື່ວ່າເປັນຄົນບໍ່ຮູ້ບຸນຄຸນ ຍ່ອມບໍ່ພົບເຫັນຄວາມຈະເລີນ
ບຸກຄົນໃດປະທຸດສະຮ້າຍຕໍ່ຄົນຜູ້ບໍ່ປະທຸດສະຮ້າຍ
ເປັນຜູ້ບໍລິສຸດ ບໍ່ມີກິເລດເຄື່ອງກໍ່ກວນ
ຄວາມຊົ່ວຍ່ອມກັບມາເຖິງບຸກຄົນນັ້ນເຊິ່ງເປັນຄົນພານແມ່ແທ້
ດັ່ງທຸລີອັນລະອຽດທີ່ບຸກຄົນຊັດໄປທວນລົມສັນນັ້ນ

(ຣຸກຂະເທວະດາຟັງຄຳໂຕ້ຕອບຂອງຄົນທັງສອງນັ້ນແລ້ວ ໂກດພານ ຈຶ່ງກ່າວວ່າ)

[໔໖໖] ບໍ່ເຄີຍມີເທວະດາ ມະນຸດ
ຫຼືຜູ້ເປັນໃຫຍ່ຄົນໃດຈະມາຂົ່ມເຫງເຮົາໄດ້ໂດຍງ່າຍ
ເຮົາເປັນເທວະດາຜູ້ມີລິດທີ່ປະເສີດ
ໄປໄດ້ໄກ ປະກອບດ້ວຍຮູບສົມບັດແລະກຳລັງ

(ອັງກຸຣະພານິດຈຶ່ງຖາມຣຸກຂະເທວະດານັ້ນວ່າ)

[໔໙໗] ຝາມືຂອງທ່ານມີສີດັ່ງຄຳທົ່ວໄປໝົດ
ຊຶ່ງໄວ້ເຊິ່ງວັດຖຸທີ່ບຸກຄົນອື່ນປາຖະໜາດ້ວຍນິ້ວທັງ ໕
ເປັນທີ່ໄຫຼອອກແຫ່ງວັດຖຸມີຣົດແຊບ
ຣົດຕ່າງ ໆ ຍ່ອມໄຫຼອອກ
ເຮົາເຂົ້າໃຈວ່າ ທ່ານເປັນທ້າວສັກກະຜູ້ໃຫ້ທານໃນປາງກ່ອນ

(ຣຸກຂະເທວະດາຕອບວ່າ)

[໔໙໘] ເຮົາບໍ່ແມ່ນເທວະດາ ບໍ່ແມ່ນຄົນທັບ
ທັງບໍ່ແມ່ນທ້າວສັກກະຜູ້ໃຫ້ທານໃນປາງກ່ອນ
ອັງກຸຣະເອີຍ ທ່ານຈົ່ງຮູ້ວ່າ
ເຮົາເປັນເຜດຈຸຕິຈາກໂຣຣຸວະນະຄອນມາຢູ່ທີ່ຕົ້ນໄຮນີ້

(ອັງກຸຣະພານິດຖາມວ່າ)

[໔໙໙] ແຕ່ກ່ອນ ທ່ານຢູ່ໃນໂຣຣຸວະນະຄອນ
ທ່ານຮັກສາສິນແນວໃດ ມີຄວາມປະພຶດຖືກແນວໃດ
ຍ້ອນພົມມະຈັນອັນໃດ
ຜົນບຸນຈຶ່ງສຳເລັດທີ່ຝາມືຂອງທ່ານ

(ຣຸກຂະເທວະດາຕອບວ່າ)

[໔໑໐] ແຕ່ກ່ອນ ເຮົາເປັນຊ່າງຫູກຢູ່ໃນໂຣຣຸວະນະຄອນ
ມີຄວາມເປັນຢູ່ແສນຈະຝືດເຄືອງ ໜ້າສົງສານ
ໃນຂະນະນັ້ນ ເຮົາບໍ່ມີອັນໃດຈະໃຫ້ທານ

[໔໑໑] ເຮືອນຂອງເຮົາຢູ່ໃກ້ເຮືອນຂອງອະໄສທະເສດຖີເຊິ່ງເປັນຜູ້ມີສັດທາ
ເປັນໃຫຍ່ໃນທານ ທຳບຸນໄວ້ແລ້ວ ມີຄວາມລະອາຍ

[໔໑໔] ພວກຍາຈົກວະນິພົກມີໂຄດຕ່າງກັນ ໄປທີ່ເຮືອນຂອງເຮົານັ້ນ
ພາກັນຖາມເຮົາເຖິງເຮືອນຂອງອະໄສທະເສດຖີວ່າ

[໔໑໓] ຂໍຄວາມຈະເລີນຈົ່ງມີແກ່ທ່ານທັງຫຼາຍ
ພວກເຮົາຈະໄປທາງໃດ ເຂົາໃຫ້ທານກັນຢູ່ໃສ

ເຮົາຖືກພວກຍາຈົກວະນິພົກຖາມແລ້ວ
ຈຶ່ງໄດ້ຊີ້ບອກເຮືອນຂອງອະໄສຫະເສດຖີ

[໔໗໔] ໄດ້ຍົກມືເບື້ອງຂວາຊີ້ບອກເຮືອນຂອງອະໄສຫະເສດຖີວ່າ
ທ່ານທັງຫຼາຍຈົ່ງໄປທາງນີ້ ຄວາມຈະເລີນຈັກມີແກ່ທ່ານທັງຫຼາຍ
ເຂົາໃຫ້ທານຢູ່ທີ່ເຮືອນຂອງອະໄສຫະເສດຖີນັ້ນ

[໔໗໕] ຍ້ອນເຫດນັ້ນ ຝາມືຂອງເຮົາຈຶ່ງໃຫ້ສິ່ງທີ່ໜ້າປາຖະໜາ
ເປັນທີ່ຫຼັ່ງອອກແຫ່ງວັດຖຸມີຣົດແຊບ
ຍ້ອນການເຮັດດີນັ້ນ ຜົນບຸນຍ່ອມສຳເລັດທີ່ຝາມືຂອງເຮົາ

(ອັງກຸຣະພານິດຖາມວ່າ)

[໔໗໖] ໄດ້ຂ່າວວ່າ ທ່ານບໍ່ໄດ້ໃຫ້ທານແກ່ໃຜ ໆ ດ້ວຍມືທັງສອງຂອງຕົນ
ເປັນແຕ່ຮ່ວມອະນຸໂມທະນາທານຂອງຜູ້ອື່ນ
ຍົກມືຊີ້ບອກທາງໃຫ້

[໔໗໗] ຍ້ອນເຫດນັ້ນ ຝາມືຂອງທ່ານຈຶ່ງໃຫ້ສິ່ງທີ່ໜ້າປາຖະໜາ
ເປັນທີ່ຫຼັ່ງອອກແຫ່ງວັດຖຸມີຣົດແຊບ
ຍ້ອນການທຳຄວາມດີນັ້ນ ຜົນບຸນຈຶ່ງສຳເລັດທີ່ຝາມືຂອງທ່ານ

[໔໗໘] ທ່ານຜູ້ຈະເລີນ ອະໄສຫະເສດຖີຜູ້ເຫຼື້ອມໃສ
ໄດ້ໃຫ້ທານດ້ວຍມືທັງສອງຂອງຕົນ
ລະຮ່າງມະນຸດແລ້ວໄປສູ່ທິດໃດນໍ

(ຣຸກຂະເທວະດາຕອບວ່າ)

[໔໗໙] ເຮົາບໍ່ຮູ້ທາງໄປຫຼືທາງມາ
ຂອງອະໄສຫະເສດຖີຜູ້ມີຣັດສະໝີຊ່ານອອກຈາກຕົນ
ແຕ່ເຮົາໄດ້ຟັງມາໃນສຳນັກຂອງທ້າວເວດສະວັນວ່າ
ອະໄສຫະເສດຖີໄດ້ເປັນສະຫາຍຂອງທ້າວສັກກະ

(ອັງກຸຣະພານິດກ່າວວ່າ)

[໔໘໐] ບຸກຄົນຄວນທຳຄວາມດີແທ້
ຄວນໃຫ້ທານຕາມສົມຄວນ

ໃຜບໍ່ໄດ້ເຫັນຝາມືເຊິ່ງໃຫ້ສິ່ງທີ່ໜ້າປາຖະໜາແລ້ວຈັກບໍ່ເຮັດບຸນ

[໔໗໑] ເຮົາຈາກທີ່ນີ້ໄປເຖິງເມືອງທະວາຣະວະດີ
ຈັກຟ້າວພໍ່າເພັງທານເຊິ່ງຈັກນຳຄວາມສຸກມາໃຫ້ເຮົາແນ່ນອນ

[໔໗໔] ຈັກໃຫ້ເຂົ້າ ນໍ້າ ຜ້າ ບ່ອນຢູ່ອາໄສ ນໍ້າສ້າງ ສະນໍ້າ
ແລະຂົວໃນບ່ອນຍ່າງລຳບາກເປັນທານ
(ອັງກຸຣະພານິດຖາມຣຸກຂະເທວະດາວ່າ)

[໔໗໓] ຍ້ອນເຫດໃດ ນິ້ວມືຂອງທ່ານຈຶ່ງຫງິກງໍ
ໜ້າຂອງທ່ານຈຶ່ງບິດບ້ຽວ
ແລະໜ່ວຍຕາທັງສອງຈຶ່ງມົວ(ດ້ວຍຂີ້ຕາ)
ທ່ານໄດ້ເຮັດບາບອັນໃດໄວ້

(ຣຸກຂະເທວະດານັ້ນຕອບວ່າ)

[໔໗໔] ເຮົາໄດ້ຮັບແຕ່ງຕັ້ງໃຫ້ເປັນໃຫຍ່ໃນການໃຫ້ທານ
ໃນໂຮງທານຂອງຄະຫະບໍດີຜູ້ມີຮັດສະໝີຊ່ານອອກຈາກຕົນ
ມີສັດທາ ຍັງຄອງເຮືອນຢູ່

[໔໗໕] ເຫັນຍາຈົກຜູ້ຕ້ອງການອາຫານພາກັນມາທີ່ໂຮງທານນັ້ນແລ້ວ
ໄດ້ຫຼີກໄປເຮັດໜ້າງໍຢູ່ໃນທີ່ຂ້າງໜຶ່ງ

[໔໗໖] ຍ້ອນກຳນັ້ນ ນິ້ວຂອງເຮົາຈຶ່ງຫງິກງໍ
ໜ້າຂອງເຮົາຈຶ່ງບິດບ້ຽວ ແລະໜ່ວຍຕາທັງສອງຂອງເຮົາຈຶ່ງມົວ
ເຮົາໄດ້ເຮັດບາບນັ້ນໄວ້

(ອັງກຸຣະພານິດຖາມວ່າ)

[໔໗໗] ແນ່ະບຸຣຸດຊົ່ວຊາມ ສົມຄວນແລ້ວທີ່ທ່ານມີໜ້າບິດບ້ຽວ
ໜ່ວຍຕາທັງສອງຈຶ່ງມົວ ຍ້ອນທ່ານໄດ້ເຮັດໜ້າງໍຕໍ່ທານຂອງຜູ້ອື່ນ

[໔໗໘] ເປັນຫຍັງ ອະໄສທະເສດຖີເມື່ອຈະໃຫ້ທານ
ຈຶ່ງໄດ້ມອບເຂົ້າ ນໍ້າ ຂອງຫຍໍ້າ ຜ້າ
ແລະບ່ອນຢູ່ອາໄສໃຫ້ຜູ້ອື່ນຈັດແຈ່ງ

[໔໗໙] ເຮົາຈາກບ່ອນນີ້ໄປເຖິງເມືອງທະວາຣາວະດີ
ຈັກຟ້າວພ່ຳເພັງທານເຊິ່ງຈະນຳຄວາມສຸກມາໃຫ້ແກ່ເຮົາແນ່ນອນ

[໔໘໐] ຈັກໃຫ້ເຂົ້າ ນ້ຳ ຜ້າ ບ່ອນຢູ່ອາໄສ ນ້ຳສ້າງ ສະນ້ຳ
ແລະຂົວໃນບ່ອນທີ່ຍ່າງລຳບາກເປັນທານ

[໔໘໑] ອັງກຸຣະພານິດນັ້ນກັບຈາກທະເລຊາຍນັ້ນ
ໄປເຖິງເມືອງທະວາຣາວະດີແລ້ວ
ເລີ່ມພ່ຳເພັງທານເຊິ່ງຈະນຳຄວາມສຸກມາໃຫ້ຕົນ

[໔໘໔] ໄດ້ໃຫ້ເຂົ້າ ນ້ຳ ຜ້າ ທີ່ຢູ່ອາໄສ ນ້ຳສ້າງ ສະນ້ຳ
ດ້ວຍຈິດອັນເຫຼື້ອມໃສແລ້ວ

[໔໘໓] ຊ່າງຕັດຜົມ ພໍ່ຄົວຊາວມະຄົດພາກັນປ່າວຮ້ອງໃນເຮືອນ
ຂອງອັງກຸຣະພານິດນັ້ນທັງໃນເວລາຄ່ຳທັງໃນເວລາເຊົ້າທຸກມື້ວ່າ
ໃຜຫິວຈິ່ງມາກິນຕາມພໍໃຈ
ໃຜຢາກຈິ່ງມາດື່ມຕາມພໍໃຈ
ໃຜຈັກນຸ່ງຫົ່ມຜ້າຈິ່ງມານຸ່ງຫົ່ມຕາມພໍໃຈ
ໃຜຕ້ອງການພາຫະນະທຽມລົດຈິ່ງເລືອກພາຫະນະທີ່ພໍໃຈ
ຈາກໝູ່ພາຫະນະທຽມລົດນີ້ແລ້ວທຽມເທີ້ນ

[໔໘໔] ໃຜຕ້ອງການຮົ່ມຈິ່ງມາເອົາຮົ່ມໄປ
ໃຜຕ້ອງການຂອງຫອມຈິ່ງມາເອົາຂອງຫອມໄປ
ໃຜຕ້ອງການດອກໄມ້ຈິ່ງມາເອົາດອກໄມ້ໄປ
ໃຜຕ້ອງການເກີບຈິ່ງມາເອົາເກີບໄປ

[໔໘໕] ຊົນຍ່ອມຍ້ອງຍໍເຮົາວ່າ ອັງກຸຣະພານິດນອນເປັນສຸກ
ສິນທຸມານົບເອີຍ ຍ້ອນບໍ່ເຫັນເຫຼົ່າຊົນຜູ້ຂໍ ເຮົາຈຶ່ງນອນເປັນທຸກ

[໔໘໖] ຊົນຍ່ອມຍ້ອງຍໍເຮົາວ່າ ອັງກຸຣະພານິດນອນເປັນສຸກ
ສິນທຸມານົບເອີຍ ເມື່ອວະນິພົກມີໜ້ອຍ ເຮົາຈຶ່ງນອນເປັນທຸກ

(ສິນທຸມານົບໄດ້ຟັງດັ່ງນັ້ນຈຶ່ງກ່າວວ່າ)

[໔໘໗] ຖ້າທ້າວສັກກະຜູ້ເປັນໃຫຍ່ກວ່າຊາວຕາວະຕິງສາ

ແລະເປັນໃຫຍ່ກວ່າຊາວໂລກທັງປວງ ເພິ່ງປະທານພອນແກ່ທ່ານ
ເມື່ອທ່ານຈະເລືອກ ທ່ານຈະເລືອກຂໍພອນແນວໃດ

(ອັງກຸຣະພານິດກ່າວວ່າ)

[໔໙໗] ຖ້າທ້າວສັກກະຜູ້ເປັນໃຫຍ່ກວ່າຊາວຕາວະຕິງສາ ເພິ່ງປະທານພອນແກ່ເຮົາ
ເຮົາຈະເພິ່ງຂໍພອນວ່າ ເມື່ອເຮົາລຸກຂຶ້ນແຕ່ເຊົ້າ ໃນເວລາພຣະອາທິດຂຶ້ນ
ພັກສາຫານອັນເປັນທິບແລະເຫຼົ່າຊົນຜູ້ຂໍເຊິ່ງມີສິນເພິ່ງຜາກົດຂຶ້ນ

[໔໙໙] ເມື່ອເຮົາໃຫ້ຢູ່ ວັດຖຸທານບໍ່ເພິ່ງສິ້ນໄປ
ເມື່ອເຮົາໃຫ້ທານນັ້ນແລ້ວ ບໍ່ເພິ່ງເດືອດຮ້ອນໃນພາຍຫຼັງ
ເມື່ອກຳລັງໃຫ້ ເພິ່ງຍັງຈິດໃຫ້ເຫຼື້ອມໃສ
ເຮົາເພິ່ງເລືອກຂໍພອນແນວນີ້ກັບທ້າວສັກກະ

(ໂສນະກະບຸຣຸດກ່າວເຕືອນອັງກຸຣະພານິດວ່າ)

[໕໐໐] ບຸກຄົນບໍ່ຄວນໃຫ້ຊັບເຄື່ອງພໍໃຈທັງໝົດແກ່ບຸກຄົນອື່ນ
ຄວນໃຫ້ທານແລະຄວນຮັກສາຊັບໄວ້
ຍ້ອນວ່າຊັບທີ່ນັ້ນປະເສີດກວ່າທານ
ຍ້ອນການໃຫ້ທານເກີນປະມານ ສະກຸນທັງຫຼາຍຈະລົ້ມ

[໕໐໑] ບັນດິດທັງຫຼາຍຍ່ອມບໍ່ສັນເສີນການບໍ່ໃຫ້ທານແລະການໃຫ້ເກີນຄວນ
ຍ້ອນເຫດນັ້ນແລ ຊັບທີ່ນັ້ນປະເສີດກວ່າທານ
ປະເພນີແຫ່ງການໃຫ້ທານແລະການບໍ່ໃຫ້
ເປັນທຳນຽມຂອງບຸກຄົນຜູ້ເປັນນັກປາດ ເພິ່ງເປັນໄປໂດຍພໍເໝາະ

(ອັງກຸຣະພານິດກ່າວວ່າ)

[໕໐໔] ຊາວເຮົາທັງຫຼາຍ ດີນໍ ເຮົາເພິ່ງໃຫ້ທານແນ່ແທ້
ດ້ວຍວ່າສັດຕະບຸຣຸດທັງຫຼາຍຜູ້ສະງົບລະງັບເພິ່ງຄົບຫາເຮົາ
ເຮົາເພິ່ງທຳຄວາມປະສົງຂອງວະນິພົກທັງປວງໃຫ້ເຕັມ ລ້ຽງດູໃຫ້ອິ່ມໜຳ
ປຽບຄືຝົນຕົກເຮັດບ່ອນຫຼຸບທັງຫຼາຍໃຫ້ເຕັມ

[໕໐໕] ບຸກຄົນຜູ້ມີສີໜ້າຜ່ອງໃສ ຍ້ອນເຫັນເຫຼົ່າຊົນຜູ້ຂໍ
ເມື່ອໃຫ້ທານແລ້ວມີໃຈເບີກບານ

ຂໍ້ນັ້ນເປັນຄວາມສຸກຂອງບຸກຄົນຜູ້ຢູ່ຄອງເຮືອນ

[໓໐໔] ບຸກຄົນຜູ້ມີສີໜ້າຜ່ອງໃສ ຍ້ອນເຫັນເຫຼົ່າຊົນຜູ້ຂໍ
ເມື່ອໃຫ້ທານແລ້ວມີໃຈເບີກບານ
ນີ້ເປັນຄວາມເຖິງພ້ອມແຫ່ງຍັນ(ບຸນ)

[໓໐໕] ກ່ອນແຕ່ໃຫ້ກໍມີໃຈດີ
ເມື່ອກຳລັງໃຫ້ກໍເຮັດຈິດໃຫ້ເຫຼື້ອມໃສ
ເມື່ອໃຫ້ແລ້ວກໍມີໃຈເບີກບານ
ນີ້ເປັນຄວາມເຖິງພ້ອມແຫ່ງຍັນ

(ພຣະສັງຄີຕິກາຈານທັງຫຼາຍກ່າວເປັນຄາຖາວ່າ)

[໓໐໖] ໃນເຮືອນຂອງອັງກຸຣະພານິດຜູ້ມັ່ງບຸນ
ເຂົາໃຫ້ໂພຊະນະແກ່ໝູ່ຊົນມື້ລະ ໖໐,໐໐໐ ເຫຼັ້ມກວຽນຢູ່ປະຈຳ

[໓໐໗] ພໍ່ຄົວ ໓,໐໐໐ ຄົນປະດັບດ້ວຍຕຸ້ມຫູແກ້ວມະນີ
ເປັນຜູ້ຂົນຂວາຍໃນການໃຫ້ທານ
ພາກັນເຂົ້າໄປອາໄສອັງກຸຣະພານິດລ້ຽງຊີບ

[໓໐໘] ມານົບ ໖໐,໐໐໐ ຄົນປະດັບດ້ວຍຕຸ້ມຫູແກ້ວມະນີ
ຊ່ອຍກັນຜ່າຟືນໃນມະຫາທານຂອງອັງກຸຣະພານິດ

[໓໐໙] ນາຣີ ໑໖,໐໐໐ ຄົນປະດັບດ້ວຍເຄື່ອງປະດັບທັງປວງ
ຊ່ອຍກັນບົດເຄື່ອງເທດ(ສຳລັບປຸງອາຫານ)
ໃນມະຫາທານຂອງອັງກຸຣະພານິດ

[໓໑໐] ນາຣີອີກ ໑໖,໐໐໐ ຄົນປະດັບດ້ວຍເຄື່ອງປະດັບທັງປວງ
ຖືຈອງເຂົ້າໄປຢືນຖ້າຮັບໃຊ້ໃນມະຫາທານຂອງອັງກຸຣະພານິດ

[໓໑໑] ອັງກຸຣະພານິດນັ້ນໄດ້ໃຫ້ຂອງຫຼວງຫຼາຍ
ແກ່ຄົນຈຳນວນຫຼາຍໂດຍປະການຕ່າງ ໆ
ໄດ້ທຳຄວາມເຄົາລົບແລະຄວາມເຫຼື້ອມໃສໃນກະສັດດ້ວຍມືຂອງຕົນຢູ່ປະຈຳ
ໃຫ້ທານໂດຍປະການຕ່າງ ໆ ສິ້ນການລະນານ

[໓໑໒] ອັງກຸຣະພານິດພ່ຳເພັງມະຫາທານໃຫ້ເປັນໄປແລ້ວຕະຫຼອດເດືອນ

ຕະຫຼອດປັກ ຕະຫຼອດລະດູ ຕະຫຼອດປີຫຼວງຫຼາຍ ຕະຫຼອດການລະນານ

[໓໑໓] ອັງກຸຣະພານິດນັ້ນໄດ້ໃຫ້ທານ ບູຊາແລ້ວແນວນີ້ຕະຫຼອດການລະນານ ລະຮ່າງມະນຸດແລ້ວ ໄດ້ໄປບັງເກີດໃນພົບຕາວະຕິງສາ

[໓໑໔] ອິນທະກະມານົບຖວາຍພິກສາຈອງໜຶ່ງແກ່ພຣະອະນຸຣຸດທະເຖຣະ ລະຮ່າງມະນຸດແລ້ວໄດ້ໄປບັງເກີດໃນພົບຕາວະຕິງສາ

[໓໑໕] ແຕ່ອິນທະກະເທບພະບຸດຮຸ່ງເຮືອງຍິ່ງກວ່າອັງກຸຣະເທບພະບຸດ
ໂດຍຖານະ ໑໐ ຢ່າງ ຄື
ຮູບ ສຽງ ກິ່ນ ຣົດ ໂຜດຖັບພະທີ່ໜ້າອອນຊອນໃຈ

[໓໑໖] ອາຍຸ ຍົດ ວັນນະ ສຸກ ແລະຄວາມເປັນໃຫຍ່ຍິ່ງ
(ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ) ອັງກຸຣະ
ທ່ານໃຫ້ມະຫາທານສິ້ນການລະນານ
ມາໃນສຳນັກຂອງເຮົາ ເປັນຫຍັງຈຶ່ງນັ່ງຢູ່ໄກເກີນໄປ

[໓໑໗] ຄັ້ງທີ່ພຣະພຸດທະເຈົ້າເຊິ່ງເປັນບຸຣຸດຜູ້ສູງສຸດ
ປະທັບຢູ່ທີ່ບັນດຸກຳພົນສິລາອາດ[១]
ທີ່ເຫງົ້າຕົ້ນປາຣິສັດຕະກະພຶກ ຢູ່ພົບຕາວະຕິງສາ

[໓໑໘] ເທວະດາໃນໝື່ນໂລກກະທາດພາກັນມານັ່ງປະຊຸມ
ເຝົ້າພຣະສຳມາສຳພຸດທະເຈົ້າເຊິ່ງປະທັບຢູ່ເທິງຈອມພູ

[໓໑໙] ບໍ່ມີເທວະດາຕົນໃດມີຜິວພັນງາມຮຸ່ງເຮືອງ
ຍິ່ງກວ່າພຣະສຳມາສຳພຸດທະເຈົ້າ
ພຣະສຳມາສຳພຸດທະເຈົ້າທ່ານັ້ນງົດງາມຮຸ່ງເຮືອງຍິ່ງກວ່າເທວະດາທັງປວງ

[໓໒໐] ຄັ້ງນັ້ນ ອັງກຸຣະເທບພະບຸດນີ້ຢູ່ໃນບ່ອນໄກ ໑໒ ໂຍດ
ຈາກທີ່ພຣະສາດສະດາປະທັບຢູ່
ສ່ວນອິນທະກະເທບພະບຸດນັ່ງ
ໃນບ່ອນໃກ້ພຣະສຳມາສຳພຸດທະເຈົ້າ ຮຸ່ງເຮືອງຍິ່ງກວ່າ

[໓໒໑] ພຣະສຳມາສຳພຸດທະເຈົ້າທອດພຣະເນດເຫັນ
ອັງກຸຣະເທບພະບຸດແລະອິນທະກະເທບພະບຸດ

ເມື່ອຈະຊົງປະກາດພຣະທັກຂິໄນຍະບຸກຄົນ
ຈຶ່ງໄດ້ຕັດພຣະພຸດທະພົດນີ້ວ່າ

[໓໔໔] ອັງກຸຣະເທບພະບຸດ ທ່ານໃຫ້ມະຫາທານສິ້ນການລະນານ
ມາໃນສຳນັກຂອງເຮົາ ເປັນຫຍັງຈຶ່ງນັ່ງຢູ່ໄກເກີນໄປ

[໓໔໓] ອັງກຸຣະເທບພະບຸດຜູ້ອັນພຣະສຳມາສຳພຸດທະເຈົ້າ
ຜູ້ອົບຮົມພຣະອົງເອງຊົງຕັກເຕືອນແລ້ວ
ໄດ້ຂາບທູນດັ່ງນີ້ວ່າ ຈະປະສົງອັນໃດດ້ວຍທານຂອງຂ້າພຣະອົງນັ້ນ
ເຊິ່ງວ່າງຈາກພຣະທັກຂິໄນຍະບຸກຄົນ

[໓໔໔] ອິນທະກະເທບພະບຸດນີ້ໃຫ້ທານພຽງໜ້ອຍດຽວ
ຮຸ່ງເຮືອງຍິ່ງກວ່າຂ້າພຣະອົງ
ດັ່ງດວງຈັນຮຸ່ງເຮືອງຍິ່ງກວ່າໝູ່ດາວ

(ອິນທະກະເທບພະບຸດຂາບທູນວ່າ)

[໓໔໕] ພືດແມ່ນຫຼາຍທີ່ບຸກຄົນຫວ່ານລົງໃນນາໂນນ
ຍ່ອມມີຜົນບໍ່ໄພບູນ ທັງບໍ່ເຮັດຊາວນາໃຫ້ພໍໃຈ ສັນໃດ

[໓໔໖] ທານຫຼວງຫຼາຍທີ່ບຸກຄົນຕັ້ງໄວ້ໃນບຸກຄົນຜູ້ທຸສິນ
ຍ່ອມມີຜົນບໍ່ໄພບູນ ທັງບໍ່ເຮັດທາຍົກໃຫ້ພໍໃຈ ກໍຄືກັນສັນນັ້ນ

[໓໔໗] ພືດແມ່ນໜ້ອຍທີ່ບຸກຄົນຫວ່ານລົງໃນນາດີ
ເມື່ອຝົນຕົກສະໝ່ຳສະເໝີ ຜົນຍ່ອມເຮັດຊາວນາໃຫ້ພໍໃຈ ສັນໃດ

[໓໔໘] ອຸປະກາຣະແມ່ນໜ້ອຍທີ່ບຸກຄົນເຮັດແລ້ວໃນທ່ານຜູ້ມີສິນ
ມີຄຸນຄວາມດີ ຜູ້ໝັ້ນຄົງ ບຸນຍ່ອມກັບມີຜົນຫຼາຍ ຄືກັນສັນນັ້ນ

[໓໔໙] ຄວນເລືອກໃຫ້ທານໃນເຂດທີ່ບຸກຄົນໃຫ້ແລ້ວມີຜົນຫຼາຍ
ທາຍົກເລືອກໃຫ້ທານແລ້ວ ຈຶ່ງໄປສູ່ສະຫວັນ

[໓໓໐] ທານທີ່ເລືອກໃຫ້ພຣະສຸຄົດເຈົ້າຊົງສັນເສີນ
ທານທີ່ທາຍົກໃຫ້ໃນພຣະທັກຂິໄນຍະບຸກຄົນທັງຫຼາຍທີ່ຍັງຢູ່ໃນມະນຸດສາໂລກນີ້
ຍ່ອມມີຜົນຫຼາຍ ຄືພືດທີ່ຫວ່ານລົງໃນນາດີ

**ອັງກຸຣະເປຕະວັດຖຸທີ ໙ ຈົບ**

# ໑໐. ອຸດຕະຣະມາຕຸເປຕິວັດຖຸ

## ເລື້ອງນາງເຜດມານດາຂອງອຸດຕະຣະມານົບ

[໓໓໑] ນາງເຜດຜູ້ມີຜິວພັນໜ້າກຽດຊັງເປັນຕາຢ້ານ
ເຂົ້າໄປຫາພິກຂຸນັ້ນຜູ້ຢູ່ໃນບ່ອນພັກກາງເວັນ
ເຊິ່ງນັ່ງຢູ່ທີ່ແຄມຝັ່ງແມ່ນ້ຳຄົງຄາ

[໓໓໒] ນາງມີຜົມຍາວຫ້ອຍລົງມາຮອດພື້ນດິນ
ມີຜົມປົກຄຸມຢູ່ແລ້ວ
ໄດ້ກ່າວກັບສະມະນະນັ້ນດັ່ງນີ້ວ່າ

[໓໓໓] ຕັ້ງແຕ່ຂ້ານ້ອຍຕາຍຈາກມະນຸດສາໂລກເປັນເວລາ ໕໕ ປີແລ້ວ
ຍັງບໍ່ໄດ້ກິນເຂົ້າແລະດື່ມນ້ຳເລີຍ
ຂໍທ່ານຈົ່ງໃຫ້ນ້ຳດື່ມແກ່ຂ້ານ້ອຍຜູ້ຫິວນ້ຳດ້ວຍເທີ້ນ ຂ້ານ້ອຍ

(ພິກຂຸນັ້ນກ່າວວ່າ)

[໓໓໔] ແມ່ນ້ຳຄົງຄານີ້ມີນ້ຳເຢັນ ໄຫຼມາຈາກພູຫິມະພານ
ທ່ານຈົ່ງຕັກນ້ຳຈາກແມ່ນ້ຳຄົງຄານັ້ນດື່ມເທີ້ນ ຈະມາຂໍເຮົາເຮັດຫຍັງ

(ນາງເຜດນັ້ນຕອບວ່າ)

[໓໓໕] ທ່ານຜູ້ຈະເລີນ ຖ້າຂ້ານ້ອຍຕັກນ້ຳໃນແມ່ນ້ຳຄົງຄາດື່ມເອງ
ນ້ຳນັ້ນຈະກາຍເປັນເລືອດ (ຍ້ອນຜົນແຫ່ງບາບກຳ)ຂອງຂ້ານ້ອຍ
ຍ້ອນແນວນັ້ນ ຂ້ານ້ອຍຈຶ່ງຂໍນ້ຳດື່ມ

(ພິກຂຸນັ້ນຖາມວ່າ)

[໓໓໖] ແຕ່ກ່ອນທ່ານໄດ້ເຮັດກຳຊົ່ວທາງກາຍ ວາຈາ ໃຈອັນໃດໄວ້ບໍ
ຍ້ອນຜົນກຳອັນໃດນ້ຳໃນແມ່ນ້ຳຄົງຄາຈຶ່ງກາຍເປັນເລືອດຜາກົດແກ່ທ່ານ

(ນາງເຜດນັ້ນຕອບວ່າ)

[໓໓໗] ຂ້ານ້ອຍມີລູກຊາຍຄົນໜຶ່ງຊື່ອຸດຕະຣະ ເປັນອຸປາສົກມີສັດທາ
ແລະເຂົາໄດ້ຖວາຍຈີວອນ ບິນທະບາດ ບ່ອນນອນ ບ່ອນນັ່ງ

ແລະຢາສຳລັບແກ້ໄຂ້
ແກ່ສະມະນະທັງຫຼາຍດ້ວຍຄວາມບໍ່ພໍໃຈຂອງຂ້ານ້ອຍ

[໓໓໗] ຂ້ານ້ອຍຖືກຄວາມຂີ້ຖີ່ຄອບງຳ ໄດ້ດ່າເຂົາວ່າ

[໓໓໙] ເຈົ້າຖວາຍຈີວອນ ບິນທະບາດ ບ່ອນນອນ ບ່ອນນັ່ງ
ແລະຢາສຳລັບແກ້ໄຂ້ ດ້ວຍຄວາມບໍ່ພໍໃຈຂອງແມ່

[໓໔໐] ອຸດຕະຣະ ສິ່ງນັ້ນຈຶ່ງກາຍເປັນເລືອດຜາກົດແກ່ເຈົ້າໃນປະຣະໂລກ
ຍ້ອນຜົນກຳນັ້ນນ້ຳໃນແມ່ນ້ຳຄົງຄາຈຶ່ງກາຍເປັນເລືອດຜາກົດແກ່ຂ້ານ້ອຍ

**ອຸດຕະຣະມາຕຸເປຕິວັດຖຸທີ ໑໐ ຈົບ**

## ໑໑. ສຸດຕະເປຕະວັດຖຸ

## ເລື້ອງຍິງຜູ້ຖວາຍດ້າຍໄດ້ໄປຢູ່ກັບເຜດ

(ຍິງຄົນໜຶ່ງໄປຢູ່ກັບເວມານິກະເຜດເປັນເວລາ ກ໐໐ ປີ ເກີດຄວາມເບື່ອໜ່າຍ ຈຶ່ງກ່າວກັບເວມານິກະເຜດນັ້ນວ່າ)

[໓໔໑] ແຕ່ກ່ອນ ຂ້ອຍໄດ້ຖວາຍດ້າຍແກ່ພິກຂຸເຊິ່ງເຂົ້າໄປຂໍເຖິງເຮືອນຂອງຂ້ອຍ
ຂ້ອຍໄດ້ສະເຫວີຍວິບາກເຊິ່ງເປັນຜົນແຫ່ງການຖວາຍດ້າຍນັ້ນ
ອັນໜຶ່ງ ຜ້າຫຼວງຫຼາຍຫຼາຍໂກຕິບັງເກີດມີແກ່ຂ້ອຍ

[໓໔໔] ວິມານຂອງຂ້ອຍເດຍລະດາດໄປດ້ວຍດອກໄມ້
ໜ້າອອນຊອນແສນຈະງົດງາມ
ທັງເທບພະບຸດເທບທິດາພາກັນມາຊົມບໍ່ຂາດສາຍ
ຂ້ອຍເລືອກໃຊ້ສອຍນຸ່ງແລະຫົ່ມຕາມປາຖະໜາເຖິງພຽງນີ້
ສັບພະວັດຖຸເຊິ່ງເປັນອຸປະກອນເຄື່ອງພໍໃຈຫຼວງຫຼາຍກໍຍັງບໍ່ໝົດໄປ

[໓໔໓] ຂ້ອຍໄດ້ຮັບຄວາມສຸກແລະຄວາມສຸກສະບາຍໃນວິມານນີ້
ຍ້ອນອາໄສວິບາກແຫ່ງກຳນັ້ນເອງ
ກັບໄປສູ່ມະນຸດສາໂລກແລ້ວຈັກເຮັດບຸນໃຫ້ຫຼາຍຂຶ້ນ
ລູກ ຂໍເຈົ້າຈົ່ງນຳຂ້ອຍກັບໄປສູ່ມະນຸດສາໂລກເທີ້ນ

(ເວມານິກະເຜດກ່າວວ່າ)

[໓໔໔] ທ່ານມາຢູ່ໃນວິມານນີ້ກວ່າ ໗໐໐ ປີ ເປັນຄົນແກ່ເຖົ້າແລ້ວ
ຈະໄປຢູ່ໃນມະນຸດສາໂລກເຮັດຫຍັງ ອັນໜຶ່ງ ຍາດຂອງທ່ານຕາຍໄປໝົດແລ້ວ
ທ່ານຈາກເປຕະໂລກນີ້ໄປສູ່ມະນຸດສາໂລກນັ້ນແລ້ວຈັກເຮັດຫຍັງໄດ້

(ຍິງນັ້ນກ່າວວ່າ)

[໓໔໕] ເມື່ອຂ້ອຍຢູ່ທີ່ວິມານນີ້ ໗ ປີໆ ໄດ້ສະເຫວີຍທິບພະສົມບັດແລະຄວາມສຸກ
ອີ່ມໜຳແລ້ວກັບໄປສູ່ມະນຸດສາໂລກຕາມເກົ່າ ຈັກເຮັດບຸນໃຫ້ຫຼາຍ
ລູກ ຂໍທ່ານຈົ່ງນຳຂ້ອຍໄປສົ່ງຍັງມະນຸດສາໂລກເທີ້ນ

[໓໔໖] ເວມານິກະເຜດນັ້ນຈັບແຂນຍິງນັ້ນ
ນຳກັບໄປສົ່ງຍັງເຮືອນທີ່ນາງເກີດແລະຈະເລີນໄວ
ແລ້ວເວົ້າກັບຍິງນັ້ນເຊິ່ງກາຍເປັນຍິງແກ່ມີກຳລັງໜ້ອຍທີ່ສຸດວ່າ
ທ່ານຈົ່ງບອກຊົນແມ່ນອື່ນໃນບ່ອນນີ້ວ່າ
ທ່ານທັງຫຼາຍຈົ່ງເຮັດບຸນຈະໄດ້ຮັບຄວາມສຸກ

[໓໔໗] ມະນຸດທັງຫຼາຍຍ່ອມເດືອດຮ້ອນຄືເຜດທັງຫຼາຍທີ່ເຮົາເຫັນແລ້ວ
ເດືອດຮ້ອນຢູ່ຍ້ອນບໍ່ໄດ້ເຮັດກຳດີໄວ້
ກຳໝູ່ສັດຄືເທວະດາແລະມະນຸດເຮັດກຳມີສຸກເປັນວິບາກແລ້ວ
ເປັນຜູ້ດຳລົງຢູ່ໃນຄວາມສຸກ

**ສຸດຕະເປຕະວັດຖຸທີ ໑໑ ຈົບ**

# ໑໔. ກັນນະມຸນທະເປຕີວັດຖຸ

## ເລື້ອງນາງເຜດຜູ້ຖືກໝາກັນນະມຸນທະກັດກິນຊີ້ນ

(ພຣະເຈົ້າພາຣານະສີຕັດຖາມນາງເວມານິກະເຜດວ່າ)

[໓໔໘] ສະໂບກຂະຣະນີມີນ້ຳໃສເຢັນ ມີຂັ້ນໄດຄຳ
ມີພື້ນດາດາດດ້ວຍຊາຍຄຳ
ໃນສະໂບກຂະຣະນີນັ້ນມີຕົ້ນໄມ້ສວຍງາມ ມີກິ່ນຫອມຍວນໃຈ

[໓໔໙] ດາດດື່ນໄປດ້ວຍໝູ່ໄມ້ນານາພັນ

ກະຈາຍອົບອວນໄປດ້ວຍກິ່ນຫອມຕ່າງ ໆ
ເດຍລະດາດໄປດ້ວຍບົວນານາຊະນິດ ຮອບລ້ອມໄປດ້ວຍບົວຂາວ

[໓໕໐] ມີກິ່ນຫອມຈະເລີນໃຈ
ຍາມຕ້ອງລົມລຳເພຍພັດກໍໂຮຍກິ່ນຫອມຫວນຟຸ້ງຂະຈອນໄປ
ຣະງົມໄປດ້ວຍສຽງທົ່ງແລະນົກກະຮຽນ
ນົກຈັກພາກໍມາສົ່ງສຽງຮ້ອງມ່ວນຈັບໃຈ

[໓໕໑] ຂວັກໄຂວ່ໄປດ້ວຍຝູງທິຊາຊາດໍນານາຊະນິດ
ມີສຽງຮ້ອງຂອງນົກນານາຊະນິດ ມ່ວນຈັບໃຈ
ມີຕົ້ນໄມ້ໃຫ້ຜົນ ໄມ້ດອກນານາພັນ

[໓໕໒] ບໍ່ມີເມືອງໃດໃນມະນຸດຄືເມືອງຂອງທ່ານນີ້
ຜາສາດຂອງທ່ານມີຫຼາຍ ສຳເລັດແລ້ວດ້ວຍຄຳແລະເງິນ
ສ່ອງແສງຮຸ່ງເຮືອງສະຫວ່າງສະໄຫວໂດຍຮອບທັງ ໔ ທິດ

[໓໕໓] ທາສີ ໕໐໐ ຄົນ ປະດັບດ້ວຍກຳໄລຄຳ
ນຸ່ງຫົ່ມຜ້າຄຳ ຖ້າປົນເປີທ່ານ

[໓໕໔] ທ່ານມີບັນລັງຄຳແລະເງິນຈຳນວນຫຼາຍ
ປູລາດດ້ວຍໜັງຊະມົດແລະຜ້າໂກເຊົາ ໌ ທີ່ເຂົາຈັດກຽມໄວ້ແລ້ວ

[໓໕໕] ທ່ານຈະເຂົ້າບັນທົມເທິງບັນລັງໃດກໍສຳເລັດສົມປະສົງທຸກຢ່າງ
ເມື່ອເຖິງທ່ຽງຄືນ ທ່ານລຸກຈາກບັນລັງນັ້ນໄປ

[໓໕໖] ລົງໄປສູ່ສວນຮອບສະໂບກຂະຣະນີ
ຢືນຢູ່ທີ່ແຄມສະນັ້ນເຊິ່ງມີຫຍ້າຂຽວອ່ອນນຸ່ມ

[໓໕໗] ທັນໃດນັ້ນ ໝາຊີ່ກັນນະມຸນທະກະກໍຂຶ້ນມາຈາກສະນັ້ນ
ກັດອະໄວຍະວະນ້ອຍໃຫຍ່ຂອງທ່ານ
ເມື່ອໃດທ່ານຖືກໝາກັດກິນເຫຼືອແຕ່ຮ່າງກະດູກ
ເມື່ອນັ້ນ ທ່ານຈຶ່ງລົງສູ່ສະໂບກຂະຣະນີ
ຮ່າງກາຍກໍກັບເປັນຄືດັ່ງເດີມ

[໓໕໘] ພາຍຫຼັງຈາກເວລາທີ່ລົງສະໂບກຂະຣະນີ

ທ່ານກັບມີອະໄວຍະວະນ້ອຍໃຫຍ່ບໍລິບູນ ງົດງາມ ເບິ່ງໜ້າຮັກ
ນຸ່ງຫົ່ມຜ້າ ມາສູ່ສໍານັກເຮົາ

[໓໕໙] ແຕ່ກ່ອນທ່ານໄດ້ເຮັດກໍາຊົ່ວທາງກາຍ ວາຈາ ໃຈອັນໃດໄວ້ບໍ
ຍ້ອນຜົນກໍາອັນໃດ
ໝາກັນນະມຸນທະກະຈຶ່ງກັດກິນອະໄວຍະວະນ້ອຍໃຫຍ່ຂອງທ່ານ

(ນາງເວມານິກະເຜດຂາບທູນວ່າ)

[໓໖໐] ມີຄະຫະບໍດີຄົນໜຶ່ງ ເປັນອຸປາສົກ ມີສັດທາ ຢູ່ໃນເມືອງກິມພິລາ
ຂ້ານ້ອຍເປັນພັນລະຍາຂອງເຂົາ ເປັນຄົນທຸສິນ ປະພຶດນອກໃຈເຂົາ

[໓໖໑] ເມື່ອຂ້ານ້ອຍປະພຶດນອກໃຈເຂົາ
ສາມີຈຶ່ງເວົ້າດັ່ງນີ້ວ່າ ການທີ່ເຈົ້າປະພຶດນອກໃຈຂ້ອຍແລ້ວປົກປິດໄວ້
ເປັນການບໍ່ເໝາະ ບໍ່ສົມຄວນ

[໓໖໒] ແລະຂ້ານ້ອຍນັ້ນໄດ້ກ່າວຕົວະສາບານຢ່າງຮ້າຍແຮງວ່າ
ຂ້ອຍບໍ່ໄດ້ປະພຶດນອກໃຈເຈົ້າທາງກາຍຫຼືທາງໃຈ

[໓໖໓] ຖ້າຂ້ອຍປະພຶດນອກໃຈເຈົ້າທາງກາຍຫຼືທາງໃຈ
ຂໍໃຫ້ໝາກັນນະມຸນທະກະໂຕນີ້ຈົ່ງກັດກິນອະໄວຍະວະນ້ອຍໃຫຍ່ຂອງຂ້ອຍເທີ້ນ

[໓໖໔] ຜົນກໍາຊົ່ວແລະການກ່າວຕົວະທັງສອງນັ້ນ
ຂ້ານ້ອຍໄດ້ສະເຫວີຍແລ້ວເປັນເວລາ ໗໐໐ ປີ
ຍ້ອນກໍາອັນຊົ່ວຊ້າໝາກັນນະມຸນທະກະ
ຈຶ່ງກັດກິນອະໄວຍະວະນ້ອຍໃຫຍ່ຂອງຂ້ານ້ອຍ

[໓໖໕] ຂໍເດຊະພຣະອົງຜູ້ປະເສີດ
ພຣະອົງຊົງມີອຸປະກາຣະແກ່ຂ້ານ້ອຍຫຼາຍ
ສະເດັດມາໃນບ່ອນນີ້ເພື່ອປະໂຫຍດແກ່ຂ້ານ້ອຍ
ຂ້ານ້ອຍພົ້ນແລ້ວຈາກໝາກັນນະມຸນທະກະ
ຫາຍໂສກ ບໍ່ມີໄພແຕ່ບ່ອນໃດ ໆ

[໓໖໖] ຂໍເດຊະ ຂ້ານ້ອຍຂໍຖວາຍບັງຄົມພຣະອົງ
ຂໍປະນົມອັນຊະລີວິງວອນວ່າ ຂໍພຣະອົງຈົ່ງສະເຫວີຍການສຸກອັນເປັນທິບ
ອອນຊອນຢູ່ກັບຂ້ານ້ອຍເທີ້ນຂ້ານ້ອຍ

(ພຣະຣາຊາຕັດວ່າ)

[໓໕໗] ເຮົາສະເຫວີຍການສຸກອັນເປັນທິບແລະອອນຊອນກັບເຈົ້າແລ້ວ
ເຊີນເທີ້ນນາງງາມ ເຮົາອ້ອນວອນເຈົ້າ
ຂໍຈົ່ງຟ້າວນຳເຮົາກັບເທີ້ນ

**ກັນນະມຸດທະເປຕິວັດຖຸທີ ໑ ໘ ຈົບ**

# ໑໓. ອຸບພະຣິເປຕະວັດຖຸ

## ເລື້ອງພຣະນາງອຸບພະຣິກັບເຜດ

[໓໕໘] ພຣະເຈົ້າພົມມະທັດຜູ້ເປັນໃຫຍ່ໃນແຄວັ້ນປັນຈາລະ
ເມື່ອມື້ຄືນລ່ວງໄປ ໆ ພຣະອົງສະເດັດສະຫວັນຄົດແລ້ວ

[໓໕໙] ພຣະນາງອຸບພະຣິມະເຫສີຂອງພຣະອົງ
ສະເດັດໄປສູ່ພຣະເມຣຸມາດແລ້ວຊົງກັນແສງຢູ່
ເມື່ອບໍ່ເຫັນພຣະເຈົ້າພົມມະທັດ ກໍຊົງກັນແສງວ່າ ພົມມະທັດ ໆ

[໓໖໐] ອັນໜຶ່ງດາບົດ໑ ຜູ້ເປັນມຸນີ ສົມບູນດ້ວຍຈະຣະນະ ໄດ້ມາບ່ອນນັ້ນ
ແລະໄດ້ຖາມຊົນທັງຫຼາຍທີ່ມາປະຊຸມກັນໃນບ່ອນນັ້ນວ່າ

[໓໖໑] ນີ້ເປັນເມຣຸມາດຂອງໃຜເຊິ່ງກະຈາຍອົບອວນໄປດ້ວຍກິ່ນຫອມຕ່າງ ໆ
ຍິງນີ້ເປັນພັນລະຍາຂອງໃຜ ເມື່ອບໍ່ເຫັນພຣະເຈົ້າພົມມະທັດຜູ້ເປັນໃຫຍ່
ເຊິ່ງສະເດັດຈາກມະນຸດສາໂລກນີ້ໄປໄກ
ຮ່ຳໄຮຢູ່ວ່າ ພົມມະທັດ ໆ

[໓໖໒] ຝ່າຍຊົນທີ່ມາປະຊຸມກັນຢູ່ໃນບ່ອນນັ້ນຕອບວ່າ
ທ່ານຜູ້ຈະເລີນ ຜູ້ນິຣະທຸກ ນີ້ເປັນພຣະເມຣຸມາດຂອງພຣະເຈົ້າພົມມະທັດ
ຍິງນີ້ເປັນພຣະມະເຫສີຂອງພຣະອົງ

[໓໖໓] ນີ້ເປັນພຣະເມຣຸມາດຂອງພຣະອົງ
ເຊິ່ງກະຈາຍອົບອວນໄປດ້ວຍກິ່ນຫອມຕ່າງ ໆ
ຍິງນີ້ເປັນພຣະມະເຫສີຂອງພຣະອົງ
ເມື່ອບໍ່ເຫັນພຣະເຈົ້າພົມມະທັດພຣະຣາດຊະສະວາມີ

ເຊິ່ງສະເດັດຈາກມະນຸດສາໂລກນີ້ໄປໄກ
ຈຶ່ງຊົງກັນແສງຢູ່ວ່າ ພິມມະທັດ ໆ

(ດາບົດຈຶ່ງທູນຖາມວ່າ)

[໓໗໔] ພຣະຣາຊາຜູ້ມີພຣະນາມວ່າພິມມະທັດ ໑໖,໐໐໐ ພຣະອົງ
ຖືກເຜົາໃນປ່າຊ້ານີ້
ບັນດາພຣະເຈົ້າພິມມະທັດເຫຼົ່ານັ້ນ
ພຣະນາງຊົງກັນແສງເຖິງພຣະເຈົ້າພິມມະທັດອົງໃດ

(ພຣະນາງອຸບພະຣິຕັດຕອບວ່າ)

[໓໗໕] ທ່ານຜູ້ຈະເລີນ ເຮົາເສົ້າໂສກເຖິງພຣະຣາຊາ
ຜູ້ເປັນພຣະຣາດຊະໂອຣົດຂອງພຣະເຈົ້າຈູລະນີ
ເປັນໃຫຍ່ໃນແຄວ້ນປັນຈາລະ ເຊິ່ງເປັນພຣະຣາດຊະສະວາມີ
ຊົງປະທານສິ່ງຂອງທີ່ໜ້າປາຖະໜາທຸກຢ່າງ

(ດາບົດທູນຖາມວ່າ)

[໓໗໖] ພຣະຣາຊາທຸກພຣະອົງຊົງພຣະນາມວ່າພິມມະທັດຄືກັນທັງໝົດ
ເປັນພຣະຣາດຊະໂອຣົດຂອງພຣະເຈົ້າຈູລະນີ
ຊົງເປັນໃຫຍ່ໃນແຄວ້ນປັນຈາລະ

[໓໗໗] ພຣະນາງເປັນພຣະມະເຫສີຂອງພຣະຣາຊາເຫຼົ່ານັ້ນທຸກພຣະອົງໂດຍລຳດັບ
ເຫດໃດຈຶ່ງລະເວັ້ນພຣະຣາຊາອົງກ່ອນ ໆ ສາ
ແລ້ວມາເສົ້າໂສກເຖິງພຣະຣາຊາອົງສຸດທ້າຍນໍ

(ພຣະນາງອຸບພະຣິຕັດຕອບວ່າ)

[໓໗໘] ທ່ານຜູ້ມີຣະທຸກ ຕະຫຼອດເວລາອັນຍາວນານ
ເຮົາເກີດເປັນສະຕີທີ່ນັ້ນ(ບໍ່ເຄີຍເກີດເປັນບຸຣຸດແດ່ບໍ)
ທ່ານເວົ້າເຖິງແຕ່ການທີ່ເຮົາເປັນສະຕີ
ໃນການວຽນວ່າຍຕາຍເກີດຫຼວງຫຼາຍ

(ດາບົດທູນຕອບວ່າ)

[໓໗໙] ບາງເວລາພຣະນາງເກີດເປັນສະຕີ
ບາງເວລາເກີດເປັນບຸຣຸດ
ບາງເວລາເກີດເປັນປະສຸສັດ
ທີ່ສຸດແຫ່ງອັດຕະພາບທັງຫຼາຍທີ່ຜ່ານມາທີ່ເຂົ້າເຖິງຄວາມເປັນຍິງເປັນຕົ້ນນັ້ນ
ຍ່ອມບໍ່ຜາກົດແນວນີ້

(ພຣະນາງອຸບພະຣິຕັດວ່າ)

[໓໗໐] ທ່ານຊ່ອຍທົດເຮົາຜູ້ຮ້ອນຮົນໃຫ້ສະງົບ
ດັບຄວາມກະວົນກະວາຍທັງໝົດ
ຄືຄົນໃຊ້ນ້ຳທົດມອດໄຟທີ່ໄໝ້ໄຂງົວ

[໓໗໑] ຜູ້ທີ່ຊ່ອຍໃຫ້ເຮົາຜູ້ກຳລັງເສົ້າໂສກເຖິງພຣະສະວາມີໃຫ້ບັນເທົາລົງໄດ້
ຊື່ວ່າໄດ້ຊ່ອຍຖອນລູກສອນຄືຄວາມໂສກທີ່ສຽບຫະໄທຂອງເຮົາແລ້ວນໍ

[໓໗໔] ພຣະມະຫາມຸນີ ເຮົາເຊິ່ງທ່ານຖອນລູກສອນຄືຄວາມໂສກໄດ້ແລ້ວ
ກໍເຢັນສະງົບ ບໍ່ເສົ້າໂສກ ບໍ່ກັນແສງອີກ
ຍ້ອນໄດ້ຟັງຄຳຂອງທ່ານ

[໓໗໓] ພຣະນາງອຸບພະຣິຟັງຄຳສຸພາສິດຂອງດາບົດຜູ້ເປັນສະມະນະນັ້ນແລ້ວ
ຖືບາດຈີວອນອອກບວດເປັນບັນພະຊິດ

[໓໗໔] ເມື່ອອອກບວດແລ້ວເປັນຜູ້ສະງົບ ຈະເລີນເມດຕາຈິດ
ເພື່ອບັງເກີດໃນພົມໂລກ

[໓໗໕] ພຣະນາງເມື່ອທ່ຽວຈາກບ້ານໜຶ່ງໄປສູ່ບ້ານໜຶ່ງ
ໄປສູ່ນິຄົມແລະຣາດຊະທານີທັງຫຼາຍ
ໄດ້ສະເດັດສະຫວັນຄົດທີ່ບ້ານອຸຣຸເວລາ

[໓໗໖] ພຣະນາງເບື່ອໜ່າຍການເກີດເປັນຍິງ
ຈະເລີນເມດຕາຈິດເພື່ອບັງເກີດໃນພົມໂລກ
ຈຶ່ງໄດ້ເປັນຜູ້ເຂົ້າເຖິງພົມໂລກແລ້ວ

**ອຸບພະຣິເປຕະວັດຖຸທີ ໑໓ ຈົບ**

**ອຸບພະຣິວັກທີ ໔ ຈົບ**

## ລວມເລື້ອງເຜດທີ່ມີໃນວັກນີ້ ຄື



# ໒. ຈູລະວັກ

## ໝວດນ້ອຍ

## ໑. ອະພິດຊະມານະເປຕະວັດຖຸ
## ເລື້ອງເຜດຜູ້ຍ່າງທວນກະແສນ້ຳອັນໄຫຼບໍ່ຂາດສາຍ

(ໂກລິຍະມະຫາອຳມາດຂອງພຣະເຈົ້າພິມພິສານ ຖາມເຜດຕົນໜຶ່ງວ່າ)

[໒໘໗] ທ່ານເປືອຍກາຍ ຄືກັບເຜດເຄິ່ງທ່ອນ
ທັດຊີງດອກໄມ້ ຕົກແຕ່ງຮ່າງກາຍ
ຍ່າງຢູ່ໃນບ່ອນນີ້ ເຊິ່ງມີນ້ຳໃນແມ່ນ້ຳຄົງຄາໄຫຼບໍ່ຂາດສາຍ
ທ່ານຈັກໄປໄສເຜດ ທ່ານຢູ່ປະຈຳບ່ອນໃດ

(ພຣະສັງຄີຕິກາຈານກ່າວຄາຖາເຫຼົ່ານີ້ວ່າ)

[໒໘໘] ເຜດນັ້ນກ່າວວ່າ ຂ້ານ້ອຍຈັກໄປສູ່ບ້ານຈຸນທັດຖິລະ
ເຊິ່ງຢູ່ໃນລະຫວ່າງວາສະພະຄາມກັບນະຄອນພາຣານະສີ

[໒໘໙] ອັນໜຶ່ງມະຫາອຳມາດເຊິ່ງຜາກົດຊື່ວ່າ ໂກລິຍະ ເຫັນເຜດນັ້ນແລ້ວ
ຈຶ່ງໄດ້ໃຫ້ເຂົ້າສັດຕຸ° ແລະຜ້າສີເຫຼືອງຄູ່ໜຶ່ງແກ່ເຜດ

[໒໙໐] ເມື່ອເຮືອຢຸດ ໄດ້ສັ່ງໃຫ້ສິ່ງຂອງເຫຼົ່ານັ້ນແກ່ອຸປາສົກຜູ້ເປັນຊ່າງຕັດຜົມ
ຜ້ານຸ່ງຜ້າຫົ່ມກໍຜາກົດແກ່ເຜດທັນທີ
ໃນຂະນະທີ່ມະຫາອຳມາດໄດ້ໃຫ້ຜ້າຄູ່ໜຶ່ງແກ່ອຸປາສົກເຊິ່ງເປັນຊ່າງຕັດຜົມ

[໓໙໑] ລຳດັບນັ້ນ ເຜດນັ້ນນຸ່ງທົ່ມຜ້າຮຽບຮ້ອຍ
ທັດຊົງດອກໄມ້ ຕົກແຕ່ງຮ່າງກາຍຢ່າງສວຍງາມ
ທັກຂິນາຍ່ອມສຳເລັດແກ່ເຜດຜູ້ດຳລົງຢູ່ໃນຖານະ ໌
ຍ້ອນແນວນັ້ນຜູ້ມີປັນຍາເພິ່ງໃຫ້ທານຢູ່ປະຈຳ ໆ ເພື່ອອະນຸເຄາະເຜດທັງຫຼາຍ

[໓໙໒] ເຜດເຫຼົ່າອື່ນລາງພວກນຸ່ງຜ້າເປື້ອນຂາດແລ້ວ
ລາງພວກນຸ່ງເສັ້ນຜົມ ຫຼີກໄປສູ່ທິດນ້ອຍໃຫຍ່ເພື່ອຫາອາຫານ

[໓໙໓] ລາງພວກແລ່ນໄປແມ່ນໃນບ່ອນໄກ ກັບມາໂດຍບໍ່ໄດ້ອັນໃດເລີຍ
ລາງພວກຫິວຫຼາຍຈົນເປັນລົມລົ້ມສະຫຼົບກິ້ງໄປເທິງພື້ນດິນ

[໓໙໔] ລາງພວກບໍ່ໄດ້ທຳຄວາມດີໄວ້ໃນຊາດກ່ອນ ບໍ່ໄດ້ອັນໃດເລີຍ
ລົ້ມກິ້ງເທິງພື້ນດິນຄືຖືກໄຟເຜົາຢູ່ກາງແດດ
ປະສົບຄວາມເດືອດຮ້ອນ ຮ່ຳໄຮວ່າ

[໓໙໕] ໃນຊາດກ່ອນ ພວກເຮົາເປັນຍິງແມ່ເຮືອນ
ເປັນມານດາເດັກອ່ອນໃນຕະກູນ ເປັນຄົນມີບາບ
ເມື່ອວັດຖຸທານມີຢູ່ ບໍ່ໄດ້ເຮັດທີ່ເພິ່ງໃຫ້ແກ່ຕົນ

[໓໙໖] ແມ່ນເຂົ້າແລະນ້ຳມີຫຼາຍແຕ່ເຮົາບໍ່ໄດ້ແຈກຈ່າຍໃຫ້ທານ
ແລະບໍ່ໄດ້ຖວາຍອັນໃດແກ່ບັນພະຊິດຜູ້ປະຕິບັດຖືກ

[໓໙໗] ຢາກເຮັດແຕ່ກຳທີ່ຄົນດີບໍ່ເພິ່ງເຮັດ ເປັນຄົນຂີ້ຄ້ານ
ຕ້ອງການແຕ່ຄວາມສຸກສະບາຍແລະກິນຫຼາຍ
ແມ່ນຜູ້ທີ່ໃຫ້ກ້ອນເຂົ້າປະຕິຄາຫົກພຽງຄຳໜຶ່ງ ຕົນກໍຍັງດ່າ

[໓໙໘] ເຮືອນ ຄົນຮັບໃຊ້ຊາຍຍິງ
ແລະຜ້າອາພອນເຫຼົ່ານັ້ນເປັນຂອງພວກເຮົາ
ແຕ່ຄົນເຫຼົ່າອື່ນເອົາໄປໃຊ້ສອຍ
ພວກເຮົາຈຶ່ງປະສົບແຕ່ທຸກ

[໓໙໙] ຊ່າງຈັກສານກໍດີ ຊ່າງໜັງກໍດີ
ຄົນປະທຸດສະຮ້າຍມິດກໍດີ ຄົນຈັບທານກໍດີ
ຄົນກຳພ້າກໍດີ ຊ່າງຕັດຜົມກໍດີ ມັກຖືກດູໝິ່ນຢູ່ບໍ່ສິ້ນສຸດ

[໔໐໐] ເຜດທັງຫຼາຍຈຸຕິຈາກເປຕະວິໄສແລ້ວ
ຍ່ອມເກີດໃນຕະກູນເຫຼົ່ານັ້ນ ເຊິ່ງເປັນຕະກູນຕໍ່າແລະຂັດສົນ
ນີ້ເປັນທີ່ເກີດສໍາລັບຄົນຂີ້ຖີ່

[໔໐໑] ສ່ວນຄົນທັງຫຼາຍທໍາຄວາມດີໄວ້ໃນຊາດປາງກ່ອນ
ມີປົກກະຕິໃຫ້ ປາສະຈາກຄວາມຂີ້ຖີ່
ພວກເຂົາຍ່ອມເຮັດສະຫວັນໃຫ້ເຕັມບໍລິບູນ
ແລະເປັ່ງຣັດສະໝີສະຫວ່າງສະໄຫວທົ່ວນັນທະວັນ

[໔໐໒] ບໍຣິໂພກການມະຄຸນຕາມຄວາມປາຖະໜາ
ອອນຊອນໃນເວຊະຍັນຕະຜາສາດ ຈຸຕິຈາກເທວະໂລກນັ້ນແລ້ວ
ຍ່ອມເກີດໃນຕະກູນສູງ ມີໂພຄະສົມບັດຫຼາຍ

[໔໐໓] ຄື ເກີດໃນຕະກູນແຫ່ງບຸກຄົນຜູ້ມີບໍລິວານຍົດ
ເຊິ່ງມີຄົນຖືພັດແວວຫາງນົກຍູງ
ຖ້າພັດຢູ່ເທິງບັນລັງທີ່ປູລາດດ້ວຍຜ້າຂົນສັດ
ໃນເຮືອນຍອດແລະຜາສາດຣາດຊະມົນທຽນ

[໔໐໔] (ໃນເວລາເປັນເດັກອ່ອນ) ກໍທັດຊົງດອກໄມ້ ຕົບແຕ່ງຮ່າງກາຍ
ໝູ່ຍາດແລະເອື້ອຍລ້ຽງນາງນົມປ່ຽນກັນອຸ້ມ
ເຫຼົ່າເອື້ອຍລ້ຽງນາງນົມປາຖະໜາຄວາມສຸກ ພາກັນບໍາລຸງຢູ່ທັງເຊົ້າແລະແລງ

[໔໐໕] ປ່າໃຫຍ່ຂອງເຫຼົ່າເທບຊັ້ນຕາວະຕິງສາເຊິ່ງປາສະຈາກຄວາມໂສກເສົ້າ
ໜ້າອອນຊອນຍິນດີ ເປັນສະຖານທີ່ເຊິ່ງເຮົາໄດ້ແລ້ວນີ້
ຍ່ອມບໍ່ມີແກ່ຜູ້ທີ່ບໍ່ໄດ້ເຮັດບຸນໄວ້ ແຕ່ຍ່ອມມີແກ່ຜູ້ທີ່ເຮັດບຸນໄວ້ທໍ່ນັ້ນ

[໔໐໖] ສ່ວນຜູ້ທີ່ບໍ່ໄດ້ເຮັດບຸນໄວ້
ຍ່ອມບໍ່ມີຄວາມສຸກທັງໃນໂລກນີ້ທັງໃນໂລກໜ້າ
ແຕ່ຜູ້ທີ່ໄດ້ເຮັດບຸນໄວ້ແລ້ວ
ຍ່ອມມີຄວາມສຸກທັງໃນໂລກນີ້ທັງໃນໂລກໜ້າ

[໔໐໗] ຜູ້ປາຖະໜາຈະຢູ່ຮ່ວມກັບເທບຊັ້ນຕາວະຕິງສາເຫຼົ່ານັ້ນ
ຕ້ອງເຮັດບຸນກຸສົນໄວ້ໃຫ້ຫຼາຍ ຍ້ອນວ່າເຫຼົ່າຊົນຜູ້ເຮັດບຸນໄວ້ແລ້ວ
ຍ່ອມພຽບພ້ອມດ້ວຍໂພຄະສົມບັດ ແຈ່ມໃສບັນເທີງຢູ່ໃນສະຫວັນ

**ອະພິດຊະມານະເປຕະວັດຖຸທີ ໑ ຈົບ**

# ໔. ສານຸວາສີເຖຣະເປຕະວັດຖຸ
## ເລື້ອງເຜດຍາດຂອງພຣະສານຸວາສີເຖຣະ

[໔໐໗] ພຣະເຖຣະຊາວກຸນທີນະຄອນອົງໜຶ່ງເຊິ່ງຢູ່ປະຈຳທີ່ພູສານະ
ມີຊື່ວ່າ ໂປດຖະປາທະ ເປັນຜູ້ສະງົບ ອົບຮົມອິນຊີແລ້ວ

[໔໐໘] ມານດາ ບິດາ ອ້າຍຂອງທ່ານຕົກຍາກ ເກີດໃນຍົມມະໂລກ
ຍ້ອນເຮັດກຳຊົ່ວໄວ້ຈຶ່ງໄປເກີດໃນເປຕະໂລກ

[໔໑໐] ເຜດເຫຼົ່ານັ້ນຕົກຍາກ ມີຮ່າງກາຍເສົ້າໝອງ
ອຶດອັດດ້ວຍຂອງບູດເນົ່າ ລຳບາກຍິ່ງ
ເປືອຍກາຍ ຈ່ອຍແຫ້ງ ສະດຸ້ງຫວາດສຽວຫຼາຍ
ເຮັດວຽກໜັກ ບໍ່ກ້າຜາກົດໂຕ

[໔໑໑] ເຜດອ້າຍຂອງທ່ານພຽງຄົນດຽວກ້າເປືອຍກາຍ
ຄານໄປສະແດງຕົນແກ່ພຣະເຖຣະໃນທາງປ່ຽວ

[໔໑໒] ຝ່າຍພຣະເຖຣະກໍບໍ່ໄດ້ໃສ່ໃຈເຖິງ
ຍ່າງກາຍໄປຢ່າງສະງົບ
ເຜດນັ້ນຈຶ່ງບອກໃຫ້ພຣະເຖຣະຮູ້ວ່າ
ຂ້ານ້ອຍຄືອ້າຍຂອງທ່ານ ເຊິ່ງໄປເກີດໃນເປຕະໂລກ

[໔໑໓] ທ່ານຜູ້ຈະເລີນ ມານດາບິດາຂອງທ່ານຕົກຍາກ ເກີດໃນຍົມມະໂລກ
ຍ້ອນເຮັດກຳຊົ່ວໄວ້ຈຶ່ງຕ້ອງໄປເກີດໃນເປຕະໂລກ

[໔໑໔] ເຜດມານດາບິດາຂອງທ່ານເຫຼົ່ານັ້ນຕົກຍາກ ມີຮ່າງກາຍເສົ້າໝອງ
ອຶດອັດດ້ວຍຂອງບູດເນົ່າ ລຳບາກຍິ່ງ
ເປືອຍກາຍ ຈ່ອຍແຫ້ງ ສະດຸ້ງ ຫວາດສຽວຫຼາຍ
ເຮັດວຽກໜັກ ບໍ່ກ້າຜາກົດໂຕ

[໔໑໕] ຂໍທ່ານກະລຸນາອະນຸເຄາະໃຫ້ທານອຸທິດສ່ວນກຸສົນໃຫ້ພວກເຮົາ
ພວກເຜດທີ່ເຮັດວຽກໜັກຈັກເປັນຢູ່ໄດ້ດ້ວຍທານທີ່ທ່ານໃຫ້ແລ້ວ

[໔໑໖] ພຣະເຖຣະແລະພິກຂຸອື່ນອີກ ໑໒ ອົງ ທ່ຽວບິນທະບາດແລ້ວ
ກັບມາປະຊຸມກັນ ຍ້ອນຕ້ອງເຮັດພັດຕະກິດ°ຮ່ວມກັນ

[໔໑໗] ພຣະເຖຣະກ່າວກັບພິກຂຸເຫຼົ່ານັ້ນແມ່ນທັງໝົດວ່າ
ຂໍທ່ານທັງຫຼາຍຈົ່ງໃຫ້ພັດຕາຫານຕາມທີ່ໄດ້ມາແກ່ຂ້ານ້ອຍເທີ້ນ
ຂ້ານ້ອຍຈັກເຮັດສັງຄະພັດ ໔ ເພື່ອອະນຸເຄາະຍາດທັງຫຼາຍ

[໔໑໘] ພິກຂຸເຫຼົ່ານັ້ນຈຶ່ງມອບຖວາຍພຣະເຖຣະ
ພຣະເຖຣະຈຶ່ງນິມົນສົງມາແລ້ວຖວາຍທານ
ເມື່ອຖວາຍແລ້ວອຸທິດສ່ວນກຸສົນໃຫ້ວ່າ
ຂໍຜົນທານນີ້ຈົ່ງສຳເລັດແກ່ຍາດທັງຫຼາຍ
ຄື ມານດາ ບິດາ ແລະອ້າຍຂອງເຮົາ
ຂໍຍາດທັງຫຼາຍຈົ່ງມີຄວາມສຸກເທີ້ນ

[໔໑໙] ໃນລຳດັບທີ່ພຣະເຖຣະອຸທິດສ່ວນບຸນໃຫ້ນັ້ນເອງ
ໂພຊະນະສະອາດ ປະນີດ ສົມບູນ ພ້ອມດ້ວຍກັບມີຣົດຕ່າງ ໆ
ກໍເກີດຂຶ້ນແກ່ເຜດເຫຼົ່ານັ້ນ

[໔໒໐] ຫຼັງຈາກທີ່ໄດ້ຂອງກິນນັ້ນ
ເຜດຜູ້ເປັນອ້າຍມີຜິວພັນດີ ມີກຳລັງ
ມີຄວາມສຸກ ກໍມາສະແດງຕົນກ່າວວ່າ
ທ່ານຜູ້ຈະເລີນ ເບິ່ງເອົາເທີ້ນ ໂພຊະນະມີຫຼວງຫຼາຍ
ແຕ່ພວກເຮົາຍັງເປືອຍກາຍຢູ່
ຂໍທ່ານຈົ່ງພະຍາຍາມທີ່ຈະໃຫ້ພວກເຮົາໄດ້ຜ້ານຸ່ງຜ້າຫົ່ມເທີ້ນ

[໔໒໑] ພຣະເຖຣະເລືອກເກັບຜ້າເກົ່າຈາກກອງຂີ້ເຫຍື້ອ
ຫຍິບຜ້າເກົ່າໃຫ້ເປັນຈີວອນ ແລ້ວໄດ້ຖວາຍສົງຜູ້ມາຈາກທິດທັງ ໔
[໔໒໒] ເມື່ອຖວາຍແລ້ວ ໄດ້ອຸທິດສ່ວນກຸສົນໃຫ້ວ່າ
ຂໍຜົນທານນີ້ຈົ່ງສຳເລັດແກ່ຍາດທັງຫຼາຍ
ຄື ມານດາ ບິດາ ແລະອ້າຍຂອງເຮົາ
ຂໍຍາດທັງຫຼາຍຈົ່ງມີຄວາມສຸກເທີ້ນ
[໔໒໓] ໃນຂະນະທີ່ພຣະເຖຣະອຸທິດສ່ວນບຸນໃຫ້ນັ້ນເອງ
ຜ້າທັງຫຼາຍກໍເກີດມີແກ່ເຜດເຫຼົ່ານັ້ນ
ຫຼັງຈາກໄດ້ຜ້າແລ້ວ ເຜດຜູ້ເປັນອ້າຍນຸ່ງຫົ່ມຜ້າສວຍງາມ
ມີຜິວພັນດີ ມີກຳລັງ ມີຄວາມສຸກ
ໄດ້ມາສະແດງຕົນແກ່ພຣະເຖຣະກ່າວວ່າ

[໒໒໔] ທ່ານຜູ້ຈະເລີນ ຜ້ານຸ່ງຜ້າຫົ່ມຂອງພວກເຮົາ
ມີຫຼາຍກວ່າຜ້າທີ່ມີໃນແຄວັນຂອງພຣະເຈົ້ານັນທະຣາດ

[໒໒໕] ຄື ຜ້າໄໝ ຜ້າຂົນສັດ ຜ້າເປືອກໄມ້ ແລະຜ້າຝ້າຍ
ຜ້າແມ່ນເຫຼົ່ານັ້ນເຫຼືອເຟືອແລະມີຄ່າຫຼາຍຫ້ອຍຢູ່ໃນອາກາດນັ້ນເອງ

[໒໒໖] ພວກເຮົາເລືອກນຸ່ງຫົ່ມສະເພາະຜືນທີ່ພໍໃຈ
ຂໍທ່ານຈົ່ງພະຍາຍາມທີ່ຈະໃຫ້ພວກເຮົາໄດ້ບ້ານເຮືອນເທີ້ນ

[໒໒໗] ພຣະເຖຣະສ້າງກຸດຕິໃບໄມ້ແລ້ວໄດ້ຖວາຍສົງຜູ້ມາຈາກທິດທັງ ໔
ເມື່ອຖວາຍແລ້ວໄດ້ອຸທິດສ່ວນກຸສົນໄປໃຫ້ວ່າ
ຂໍຜົນແຫ່ງບຸນນີ້ຈົ່ງສຳເລັດແກ່ຍາດທັງຫຼາຍ
ຄື ມານດາ ບິດາແລະອ້າຍຂອງເຮົາ
ຂໍພວກຍາດຈົ່ງມີຄວາມສຸກເທີ້ນ

[໒໒໘] ໃນຂະນະທີ່ພຣະເຖຣະອຸທິດສ່ວນບຸນໃຫ້ນັ້ນເອງ
ເຮືອນທັງຫຼາຍ ຄື ຜາສາດ ແລະບ່ອນຢູ່ອາໄສແນວອື່ນ
ເຊິ່ງຈັດສ້າງໄວ້ເປັນສັດສ່ວນ ກໍເກີດຂຶ້ນ

[໒໒໙] ເຮືອນໃນໝູ່ມະນຸດບໍ່ເປັນຄືເຮືອນຂອງພວກເຮົາໃນເປຕະໂລກນີ້
ເຮືອນຂອງພວກເຮົາໃນເປຕະໂລກນີ້ຄືເຮືອນໃນໝູ່ເທບ

[໒໓໐] ເປ່ງຣັດສະໝີຮຸ່ງເຮືອງໄປໂດຍຮອບທັງ ໔ ທິດ
ຂໍທ່ານຈົ່ງພະຍາຍາມທີ່ຈະໃຫ້ພວກເຮົາໄດ້ນ້ຳດື່ມເທີ້ນ

[໒໓໑] ພຣະເຖຣະຈຶ່ງຕັກນ້ຳເຕັມທຳມະກົກແລ້ວ
ໄດ້ຖວາຍສົງເຊິ່ງມາຈາກທິດທັງ ໔
ເມື່ອຖວາຍແລ້ວໄດ້ອຸທິດສ່ວນກຸສົນໃຫ້ວ່າ
ຂໍຜົນທານນີ້ຈົ່ງສຳເລັດແກ່ພວກຍາດຂອງເຮົາ
ຄື ມານດາ ບິດາ ແລະອ້າຍ
ຂໍພວກຍາດຂອງເຮົາຈົ່ງມີຄວາມສຸກເທີ້ນ

[໒໓໒] ໃນຂະນະທີ່ພຣະເຖຣະອຸທິດສ່ວນບຸນໃຫ້ນັ້ນເອງ
ນ້ຳດື່ມກໍເກີດຂຶ້ນເປັນສະໂບກຂະຣະນີມີຮູບສີ່ຫລ່ຽມ ເລິກ
ເຊິ່ງບຸນກຳຈັດສ້າງໄວ້ດີແລ້ວ

[໔໓໓] ມີນ້ຳເຢັນ ມີທ່າຮາບພຽງ ເຢັນສະບາຍ
ມີກິ່ນຫອມຫາບ່ອນປຽບບໍ່ໄດ້ ເດຍລະດາດດ້ວຍດອກບົວຫຼວງແລະອຸບົນ
ຜິວນ້ຳເຕັມດ້ວຍລະອອງເກສອນ

[໔໓໔] ເຜດເຫຼົ່ານັ້ນອາບແລະດື່ມກິນໃນສະນັ້ນແລ້ວ
ສະແດງຕົນແກ່ພຣະເຖຣະ ກ່າວວ່າ
ທ່ານຜູ້ຈະເລີນ ນ້ຳດື່ມຂອງພວກເຮົາມີຫຼາຍພຽງພໍແລ້ວ
ບາບຍ່ອມອອກຜົນເປັນທຸກແກ່ພວກເຮົາ

[໔໓໕] ເມື່ອພວກເຮົາທ່ຽວໄປ
ຕ້ອງຍ່າງຂະໂຍງໄປເທິງກ້ອນຫີນແລະໜໍ່ຫຍ້າຄາ
ຂໍທ່ານຈົ່ງພະຍາຍາມທີ່ຈະໃຫ້ພວກເຮົາໄດ້ຍານເທີ້ນ

[໔໓໖] ພຣະເຖຣະໄດ້ເກັບແລ້ວ ໄດ້ຖວາຍສົງຜູ້ມາຈາກທິດທັງ ໔
ເມື່ອຖວາຍແລ້ວໄດ້ອຸທິດສ່ວນກຸສົນໃຫ້ວ່າ
ຂໍຜົນທານນີ້ຈົ່ງສຳເລັດແກ່ພວກຍາດ
ຄື ມານດາ ບິດາ ແລະອ້າຍຂອງເຮົາ
ຂໍພວກຍາດຂອງເຮົາຈົ່ງມີຄວາມສຸກເທີ້ນ

[໔໓໗] ໃນຂະນະທີ່ພຣະເຖຣະອຸທິດສ່ວນບຸນໃຫ້ນັ້ນເອງ
ເຜດທັງຫຼາຍໄດ້ມາຜາກົດພ້ອມກັບລົດ
ແລ້ວກ່າວວ່າ ທ່ານຜູ້ຈະເລີນ
ພວກເຮົາໄດ້ຮັບອະນຸເຄາະດ້ວຍອາຫານ ຜ້ານຸ່ງຜ້າຫົ່ມ

[໔໓໘] ບ້ານເຮືອນ ດ້ວຍການໃຫ້ນ້ຳດື່ມ ແລະຍານທັງສອງ
ຍ້ອນແນວນັ້ນ ພວກເຮົາຈຶ່ງມາເພື່ອໄຫວ້ທ່ານ
ຜູ້ເປັນມຸນີມີຄວາມກະລຸນາໃນໂລກ

**ສານຸວາສີເຖຣະເປຕະວັດຖຸທີ ໔ ຈົບ**

## ໓. ຣະຖະກາຣະເປຕີວັດຖຸ

## ເລື້ອງນາງເວມານິກະເຜດຜູ້ອາໄສຢູ່ທີ່ສະຣະຖະການ

(ມານົບຄົນໜຶ່ງຖາມນາງເວມານິກະເຜດຕົນໜຶ່ງວ່າ)

[໔໓໙] ນາງເທວີຜູ້ມີອານຸພາບຫຼາຍ
ທ່ານຂຶ້ນວິມານທີ່ມີເສົາແກ້ວໄພທູນງາມຜຸດຜ່ອງ
ແສນຈະງົດງາມ ສະຖິດຢູ່ໃນວິມານນັ້ນ
ດັ່ງດວງຈັນໃນມື້ເພັງເດ່ນຢູ່ເທິງທ້ອງຟ້າ

[໔໔໐] ທ່ານມີຣັດສະໝີເຮືອງຮອງດັ່ງຄຳ
ມີຮູບໂສມເລີເລີດ ໜ້າເບິ່ງໜ້າຊົມຍິ່ງ
ນັ່ງຢູ່ແຕ່ຜູ້ດຽວເທິງບັນລັງອັນປະເສີດສຸດ ມີຄ່າຫຼາຍ
ທ່ານບໍ່ມີສາມີບໍ

[໔໔໑] ສະໂບກຂະຣະນີຂອງທ່ານເຫຼົ່ານີ້
ໂດຍຮອບມີດອກໄມ້ຕ່າງ ໆ ຢູ່ຫຼາຍ ມີບົວຂາວຫຼາຍ
ໂດຍຮອບລາດດ້ວຍຊາຍຄຳ
ໃນສະໂບກຂະນີນັ້ນບໍ່ເປືອກຕົມແລະຈອກແໜ

[໔໔໒] ແລະມີຝູງຫົງໜ້າເບິ່ງໜ້າຊົມ ໜ້າອອນຊອນໃຈ
ລອຍວຽນຢູ່ໃນນ້ຳບໍ່ຂາດສາຍ
ທັງໝົດມີສຽງມ່ວນ
ພາກັນມາຊຸມນຸມສົ່ງສຽງຮ້ອງຢ່າງມ່ວນດັ່ງສຽງກອງ

[໔໔໓] ທ່ານຮຸ່ງເຮືອງດ້ວຍເທວະລິດ
ມີບໍລິວານຍົດ ຢືນອີງຢູ່ໃນເຮືອ
ທ່ານຜູ້ມີຄິ້ວໂກ່ງດຳປອດ
ມີໜ້າຍິ້ມແຍ້ມ ເວົ້າຈາໜ້າຮັກ
ມີອະໄວຍະວະທຸກສ່ວນງາມ ຮຸ່ງເຮືອງຍິ່ງ

[໔໔໔] ວິມານນີ້ປາສະຈາກທຸລີ
ຕັ້ງຢູ່ເທິງພາກພື້ນຮາບພຽງ
ມີສວນປ່າເຊິ່ງຊວນໃຫ້ຍິນດີເພີດເພີນຈະເລີນໃຈ
ແນ່ະນາຣີຜູ້ແນມແລ້ວບໍ່ເບື່ອ
ເຮົາປາຖະໜາທີ່ຈະຢູ່ບັນເທີງຮ່ວມກັບທ່ານໃນສວນນັນທະວັນຂອງທ່ານນີ້

(ນາງເວມານິກະເຜດກ່າວວ່າ)

[໔໔໕] ທ່ານຈົ່ງເຮັດກຳເຊິ່ງຈະໃຫ້ທ່ານໄດ້ສະເຫວີຍຜົນໃນວິມານຂອງຂ້ອຍນີ້
ແລະຈິດຂອງທ່ານຈົ່ງນ້ອມມາໃນວິມານນີ້ດ້ວຍ
ທ່ານເມື່ອເຮັດກຳເຊິ່ງເປັນເຫດໃຫ້ໄດ້ສະເຫວີຍຜົນໃນວິມານນີ້ແລ້ວ
ຈັກໄດ້ຂ້ອຍຜູ້ຈະເຮັດໃຫ້ທ່ານສົມຄວາມປາຖະໜາໄດ້ດ້ວຍປະການແນວນີ້

[໔໔໖] ມານົບນັ້ນຮັບຄຳນາງເວມານິກະເຜດນັ້ນແລ້ວ
ຈຶ່ງໄດ້ເຮັດກຸສົນກຳເຊິ່ງເປັນເຫດໃຫ້ໄດ້ສະເຫວີຍຜົນໃນວິມານນັ້ນ
ແລ້ວກໍໄດ້ຢູ່ຮ່ວມກັບນາງເວມານິກະເຜດນັ້ນ

**ຣະຖະກາຣະເປຕິວັດຖຸທີ ໓ ຈົບ**

**ພານະວາຣະທີ ໔ ຈົບ**

# ໔. ພຸສະເປຕະວັດຖຸ

## ເລື້ອງເຜດກອບແກບ

(ພຣະມະຫາໂມກຄັນລານະເຖຣະໄດ້ຖາມເຖິງບຸບພະກຳຂອງເຜດທັງ ໔ ຕົນ ດ້ວຍຄາຖາເຫຼົ່ານີ້ວ່າ)

[໔໔໗] ທ່ານທັງ ໔ ຕົນນີ້
ຕົນໜຶ່ງກອບເອົາແກບເຂົ້າສາລີທີ່ໄຟກຳລັງລຸກເປັນແປວ
ໂຮຍໃສ່ຫົວຂອງຕົນເອງ
ອີກຕົນໜຶ່ງເອົາຄ້ອນເຫຼັກທຸບຫົວຕົນເອງຈົນຫົວແຕກ
ສ່ວນຕົນນີ້ເປັນຍິງກິນຊີ້ນສ່ວນຫຼັງແລະໂລຫິດຂອງຕົນເອງ
ສ່ວນທ່ານກິນຄູດເຊິ່ງເປັນຂອງບໍ່ສະອາດ ບໍ່ໜ້າປາຖະໜາ
ນີ້ເປັນຜົນກຳອັນໃດ

(ນາງເຜດເຊິ່ງອະດີດເຄີຍເປັນພັນລະຍາພໍ່ຄ້າໂກງຕອບວ່າ)

[໔໔໘] ແຕ່ກ່ອນ ຜູ້ນີ້ທຳຮ້າຍມານດາ
ສ່ວນຜູ້ນີ້ເປັນພໍ່ຄ້າໂກງ
ຜູ້ນີ້ກິນຊີ້ນແລ້ວແກ້ໂຕດ້ວຍການກ່າວຕົວະ

[໔໔໙] ຄັ້ງທີ່ຂ້ານ້ອຍເປັນມະນຸດຢູ່ໃນໝູ່ມະນຸດ
ເປັນຍິງແມ່ເຮືອນ ໃຫຍ່ກວ່າທຸກຄົນໃນສະກຸນ
ເມື່ອສິ່ງຂອງທີ່ຊົນເຫຼົ່າອື່ນຂໍໄດ້ຍັງມີຢູ່ກໍເກັບເຊື່ອງໄວ້
(ໂດຍຄິດວ່າ) ເຮົາຈະບໍ່ໃຫ້ອັນໃດ ໆ ຈາກຂອງທີ່ມີຢູ່ນີ້

[໔໕໐] ປົກປິດໄວ້ດ້ວຍການກ່າວຕົວະວ່າ ໃນເຮືອນຂອງເຮົາບໍ່ມີສິ່ງນີ້
ຖ້າເຮົາປົກປິດຂອງທີ່ມີໄວ້ ຂໍຄູດຈົ່ງເປັນອາຫານຂອງເຮົາ

[໔໕໑] ຍ້ອນວິບາກທັງສອງ ຄື ວິບາກແຫ່ງການກະທຳນັ້ນດ້ວຍ
ວິບາກແຫ່ງການກ່າວຕົວະດ້ວຍ
ພັດເຂົ້າສາລີທີ່ມີກິ່ນຫອມຈຶ່ງກັບກາຍເປັນຄູດສຳລັບຂ້ານ້ອຍ

[໔໕໒] ອັນໜຶ່ງກຳທັງຫຼາຍບໍ່ຂາດຜົນ
ຍ້ອນກຳຍ່ອມບໍ່ສູນຫາຍ
ດັ່ງນັ້ນ ຂ້ານ້ອຍຈຶ່ງຕ້ອງທັງກິນທັງດື່ມຄູດ
ເຊິ່ງມີກິ່ນເໝັນ ມີໜອນ

**ພຸສະເປຕະວັດຖຸທີ ໔ ຈົບ**

## ໕. ກຸມາຣະເປຕະວັດຖຸ

## ເລື້ອງກຸມານເຜດ

(ເມື່ອຈະປະກາດເລື້ອງຂອງກຸມານເຜດນັ້ນ ພຣະສັງຄີຕິກາຈານໄດ້ກ່າວ ກ ຄາຖາວ່າ)

[໔໕໓] ພຣະຍານຂອງພຣະສຸຄົດເຈົ້າ ໜ້າອັດສະຈັນ
ໂດຍທີ່ພຣະສາດສະດາຊົງພະຍາກອນບຸກຄົນໄດ້ຢ່າງຖືກຕ້ອງວ່າ
ບຸກຄົນບາງເຫຼົ່າໃນໂລກນີ້ ມີບຸນຫຼາຍກໍມີ
ບາງເຫຼົ່າມີບຸນໜ້ອຍກໍມີ

[໔໕໔] ຄະຫະບໍດີຜູ້ນີ້ເມື່ອຍັງເປັນເດັກ ຖືກເຂົາຖິ້ມໄວ້ໃນປ່າຊ້າ
ເປັນຢູ່ດ້ວຍນ້ຳນົມທີ່ໄຫຼອອກຈາກນິ້ວມືຕະຫຼອດຣາຕີ
ຍັກແລະຜີ ຫຼືສັດເລືອຄານ
ກໍບໍ່ບຽດບຽນເດັກຜູ້ທີ່ໄດ້ເຮັດບຸນໄວ້ແລ້ວ

[໔໕໕] ແມ່ນໝາທັງຫຼາຍກໍພາກັນມາເລຍຕີນທັງສອງຂອງເດັກນັ້ນ
ຝູງແຫຼວແລະໝາຈອກກໍພາກັນວົນວຽນຮັກສາ
ຝູງນົກກໍພາກັນຄາບສາຍແຫ່ໄປຖິ້ມ
ສ່ວນຝູງກາພາກັນຄາບຂີ້ຕາອອກໄປ

[໔໕໖] ມະນຸດແລະອະມະນຸດໃດ ໆ ບໍ່ໄດ້ຈັດການຮັກສາເດັກນີ້
ຫຼືໃຜ ໆ ທີ່ຈະປຸງຢາຫຼືທຳການບຳບັດດ້ວຍໄນຜັກກາດບໍ່ໄດ້ມີ
ແລະບໍ່ໄດ້ຖືເອົາການປະກອບເລີກຍາມ
ທັງບໍ່ໄດ້ໂຮຍທັນຍະຊາດທັງປວງ

[໔໕໗] ເດັກທີ່ບຸກຄົນນຳມາຖິ້ມໄວ້ໃນປ່າຊ້າໃນຍາມຣາຕີ
ໄດ້ຮັບຄວາມລຳບາກຢ່າງຍິ່ງແນວນີ້
ສັ່ນເທົາຢູ່ ເປັນຄືກ້ອນເນີຍຂຸ້ນ
ຍັງເຫຼືອຢູ່ພຽງຊີວິດ ມີຄວາມສົງໄສວ່າ (ໂຕຈະລອດບໍລອດນໍ)

[໔໕໘] ພຣະຜູ້ມີພຣະພາກເຈົ້າຜູ້ອັນເທວະດາແລະມະນຸດບູຊາແລ້ວ
ຊົງມີພຣະປັນຍາກວ້າງຂວາງ ໄດ້ທອດພຣະເນດເຫັນແລ້ວ
ແລ້ວໄດ້ຊົງພະຍາກອນເດັກນັ້ນວ່າ
ເດັກນ້ອຍນີ້ຈັກເປັນຜູ້ມີສະກຸນສູງ[9] ສຳລັບນະຄອນນີ້

(ອຸປາສິກເຊິ່ງຢູ່ໃນບ່ອນໃກ້ພຣະສາດສະດາທູນຖາມວ່າ)

[໔໕໙] ຂໍ້ປະຕິບັດຂອງເຂົາເປັນແນວໃດ? ພິມມະຈັນຂອງເຂົາເປັນແນວໃດ?
ເຂົາປະພຶດຂໍ້ປະຕິບັດແລະພິມມະຈັນແນວໃດ ຈຶ່ງມີວິບາກແນວນີ້
ເຂົາເຖິງຄວາມພິນາດແນວນີ້ແລ້ວຈຶ່ງກັບມາສະເຫວີຍຄວາມສຳເລັດເຊັ່ນນັ້ນ ໆ

(ພຣະສັງຄີຕິກາຈານເມື່ອຈະສະແດງຄຳພະຍາກອນຂອງພຣະຜູ້ມີພຣະພາກເຈົ້າ ຈຶ່ງກ່າວ ໔ ຄາຖາວ່າ)

[໔໖໐] ແຕ່ກ່ອນ ໝູ່ຊົນໄດ້ທຳການບູຊາພຣະສົງ
ເຊິ່ງມີພຣະພຸດທະເຈົ້າເປັນປະທານຢ່າງມະໂຫລານ
ເດັກນັ້ນໄດ້ມີຄວາມຄິດເຫັນໃນການບູຊານັ້ນເປັນແນວອື່ນໄປ
ເຂົາໄດ້ກ່າວວາຈາຫຍາບຄາຍ ເຊິ່ງບໍ່ແມ່ນຂອງສັດຕະບຸຣຸດ

[໔໖໑] ພາຍຫຼັງເຂົາບັນເທົາຄວາມຄິດນັ້ນແລ້ວ

ກັບໄດ້ປີຕິແລະຄວາມເຫຼື້ອມໃສ ໄດ້ບຳລຸງພຣະຕະຖາຄົດເຈົ້າ
ເຊິ່ງປະທັບຢູ່ທີ່ພຣະເຊຕະວັນ ດ້ວຍເຂົ້າຕົ້ມ ກ ມື້

[໔໗໔] ຂໍ້ນັ້ນເປັນຂໍ້ປະຕິບັດແລະພົມມະຈັນຂອງເຂົາ
ເຂົາປະພຶດເຊັ່ນນັ້ນ ຈຶ່ງມີວິບາກແນວນີ້
ເຂົາເຖິງຄວາມພິນາດແນວນີ້ແລ້ວຈັກກັບໄດ້ສະເຫວີຍຄວາມສຳເລັດເຊັ່ນນັ້ນ

[໔໗໓] ເຂົາຢູ່ໃນມະນຸດສາໂລກນີ້ແລເປັນເວລາຮ້ອຍປີ
ເປັນຜູ້ພັ່ງພ້ອມດ້ວຍກາມມະຄຸນທຸກຢ່າງ ຫຼັງຈາກຕາຍໄປ
ຈັກເຂົ້າເຖິງຄວາມເປັນສະຫາຍຂອງທ້າວວາສະວະ໌ໃນສຳປະຣາຍະພົບ

**ກຸມາຣະເປຕະວັດຖຸທີ ໕ ຈົບ**

## ໗. ເສຣີນີເປຕິວັດຖຸ

## ເລື້ອງນາງເສຣີນີເຜດ

(ອຸປາສິກາຄົນໜຶ່ງຖາມນາງເສຣີນີເຜດວ່າ)

[໔໗໔] ນາງຜູ້ມີຮ່າງກາຍຈ່ອຍແຫ້ງ ມີແຕ່ກະດູກຂ້າງຜາກົດ
ທ່ານເປືອຍກາຍ ມີຜິວພັນແລະຮູບຮ່າງໜ້າກຽດຊັງເປັນຕາຢ້ານ
ຈ່ອຍແຫ້ງ ມີຮ່າງກາຍສະພັ່ງໄປດ້ວຍເສັ້ນເອັນ
ທ່ານເປັນໃຜນໍມາຢືນຢູ່ບ່ອນນີ້

(ນາງເສຣີນີເຜດຕອບວ່າ)

[໔໗໕] ທ່ານຜູ້ຈະເລີນ ເຮົາເກີດເປັນເຜດໃນຍົມມະໂລກ ໄດ້ຮັບຄວາມລຳບາກ
ຍ້ອນເຮັດກຳຊົ່ວໄວ້ຈຶ່ງຕ້ອງຈາກໂລກນີ້ໄປສູ່ເປຕະໂລກ

(ອຸປາສິກາຖາມວ່າ)

[໔໗໖] ແຕ່ກ່ອນທ່ານໄດ້ເຮັດກຳຊົ່ວທາງກາຍ ວາຈາ ໃຈອັນໃດໄວ້ນໍ
ຍ້ອນຜົນກຳອັນໃດທ່ານຈຶ່ງຕ້ອງຈາກໂລກນີ້ໄປສູ່ເປຕະໂລກ

(ນາງເສຣີນີເຜດຕອບວ່າ)

[໔໖໗]	ເມື່ອສະມະນະພາມທັງຫຼາຍ
ຜູ້ເປັນຄືທ່ານ້ຳເຊິ່ງບໍ່ມີໃຜຫວງຫ້າມມີຢູ່
ເຮົາເກັບຊັບໄວ້ປະມານເຄິ່ງມາສົກ
ເມື່ອວັດຖຸທານມີຢູ່ກໍບໍ່ໄດ້ເຮັດທີ່ເພິ່ງແກ່ຕົນ

[໔໖໘]	ເຮົາຫິວນ້ຳຈຶ່ງເຂົ້າໄປໃກ້ແມ່ນ້ຳ
ແມ່ນ້ຳກັບກາຍເປັນສິ່ງວ່າງເປົ່າໄປ
ໃນເວລາຮ້ອນເຂົ້າໄປໃກ້ຮົ່ມໄມ້
ຮົ່ມໄມ້ກັບກາຍເປັນແດດໄປ

[໔໖໙]	ທັງລົມກໍຮ້ອນຄືໄຟ ພັດເຮົາຟຸ້ງໄປ
ທ່ານຜູ້ຈະເລີນ ເຮົາສະເຫວີຍທຸກມີຄວາມຢາກເປັນຕົ້ນນີ້
ແລະທຸກແບບອື່ນທີ່ໜັກກວ່ານັ້ນ

[໔໗໐]	ທ່ານໄປເຖິງຫັດຖີນີນະຄອນແລ້ວຊ່ອຍບອກມານດາຂອງເຮົາວ່າ
ເຮົາເຫັນທິດາຂອງທ່ານຕົກຍາກ ເກີດໃນຍົມມະໂລກ
ຍ້ອນເຮັດກຳຊົ່ວໄວ້ ເຂົາຈຶ່ງຕາຍໄປເກີດຍັງເປຕະໂລກ

[໔໗໑]	ເຮົາມີຊັບຢູ່ສີ່ແສນ ເກັບເຊື່ອງໄວ້ໃຕ້ຕຽງ
ທັງບໍ່ໄດ້ບອກໃຜ ໆ ໄວ້

[໔໗໒]	ຂໍມານດາຂອງເຮົາຈົ່ງເອົາຊັບສ່ວນໜຶ່ງຈາກທີ່ເກັບເຊື່ອງໄວ້ນັ້ນ
ໃຫ້ທານແດ່ ລ້ຽງຊີບແດ່
ເມື່ອໃຫ້ທານແລ້ວຈົ່ງອຸທິດສ່ວນບຸນມາໃຫ້ເຮົາແດ່
ເມື່ອນັ້ນເຮົາຈັກມີຄວາມສຸກ ສຳເລັດຄວາມປະສົງທຸກຢ່າງ

[໔໗໓]	ອຸປາສິກນັ້ນຮັບຄຳຂອງນາງວ່າ ສາທຸ ແລ້ວໄປເຖິງຫັດຖີນີນະຄອນ
ໄດ້ບອກມານດາຂອງນາງວ່າ
ຂ້ອຍເຫັນທິດາຂອງທ່ານຕົກຍາກ ເກີດໃນຍົມມະໂລກ
ຍ້ອນເຮັດຊົ່ວໄວ້ ນາງຈຶ່ງຕາຍໄປເກີດຍັງເປຕະໂລກ

[໔໗໔]	ໃນບ່ອນນັ້ນ ນາງສັ່ງຂ້ອຍວ່າ
ທ່ານໄປເຖິງຫັດຖີນີນະຄອນແລ້ວຊ່ອຍບອກມານດາຂອງເຮົາວ່າ
ເຮົາເຫັນທິດາຂອງທ່ານຕົກຍາກ ເກີດໃນຍົມມະໂລກ

ຍ້ອນເຮັດກຳຊົ່ວໄວ້ ນາງຈຶ່ງຕາຍໄປເກີດຍັງເປຕະໂລກ

[໔໗໔] ເຮົາມີຊັບຢູ່ສີ່ແສນ ເກັບເຊື່ອງໄວ້ໃຕ້ຕຽງ
ທັງບໍ່ໄດ້ບອກໃຜ ໆ ໄວ້

[໔໗໕] ຂໍມານດາຂອງເຮົາຈົ່ງເອົາຊັບສ່ວນໜຶ່ງຈາກທີ່ເກັບເຊື່ອງໄວ້ນັ້ນ
ໃຫ້ທານແດ່ ລ້ຽງຊີບແດ່
ເມື່ອໃຫ້ທານແລ້ວຈົ່ງອຸທິດສ່ວນບຸນໃຫ້ແກ່ເຮົາແດ່
ເມື່ອນັ້ນເຮົາຈັກມີຄວາມສຸກ ສຳເລັດຄວາມປະສົງທຸກຢ່າງ

[໔໗໖] ມານດາຂອງນາງເສຣີນີເຜດນັ້ນ
ຖືເອົາຊັບສ່ວນໜຶ່ງຈາກທີ່ນາງເສຣີນີເຜດເກັບເຊື່ອງໄວ້ນັ້ນມາໃຫ້ທານ
ເມື່ອໃຫ້ແລ້ວໄດ້ອຸທິດສ່ວນບຸນໄປໃຫ້ນາງ
ນາງເສຣີນີເຜດ ມີຄວາມສຸກ
ແລະແມ່ນມານດາຂອງນາງກໍມີຄວາມເປັນຢູ່ດີຂຶ້ນ

**ເສຣີນີເປຕີວັດຖຸທີ ໕ ຈົບ**

## ໖. ມິຄະລຸດທະກະເປຕະວັດຖຸ

## ເລື້ອງເຜດນາຍພານເນື້ອ

(ພຣະນາຣະທະເຖຣະຖາມເຜດຕົນໜຶ່ງວ່າ)

[໔໗໗] ທ່ານຍັງໜຸ່ມ ມີເທບພະບຸດແລະເທບທິດາຫ້ອມລ້ອມ
ງາມດ້ວຍກາມມະຄຸນທັງຫຼາຍ ເຊິ່ງເຮັດໃຫ້ເກີດຄວາມກຳໜັດຍິນດີ
ໄດ້ສະເຫວີຍເຫດແຫ່ງທຸກໃນກາງເວັນ
ຊາດກ່ອນ ທ່ານໄດ້ເຮັດກຳອັນໃດໄວ້

(ເຜດນັ້ນຕອບວ່າ)

[໔໗໘] ເມື່ອຊາດກ່ອນ ຂ້ານ້ອຍເປັນນາຍພານເນື້ອ
ມີຝາມືເປື້ອນເລືອດ ເປັນຄົນຫຍາບຊ້າທາລຸນ
ຢູ່ທີ່ພູຄິຣິບພະຊະ ເປັນທີ່ໜ້າອອນຊອນ
ໃກ້ນະຄອນຣາດຊະຄືເຊິ່ງໜ້າອອນຊອນ

[໔໗໐] ຂ້ານ້ອຍມີໃຈປະທຸດສະຮ້າຍໃນສັດມີຊີວິດຈຳນວນຫຼາຍ
ຫຍາບຊ້າທາລຸນຢ່າງຍິ່ງ
ມັກບຽດບຽນສັດອື່ນ
ບໍ່ສັງລວມ ຫ່ຽວໄປຢູ່ປະຈຳ

[໔໗໑] ຂ້ານ້ອຍນັ້ນມີສະຫາຍໃຈດີ
ມີສັດທາ ເປັນອຸປາສົກຄົນໜຶ່ງ
ຍ້ອນເຂົາເປັນຜູ້ອີດູຂ້ານ້ອຍ
ຈຶ່ງຫ້າມຢູ່ເລື້ອຍ ໆ ວ່າ

[໔໗໔] ສະຫາຍເອີຍ ຢ່າໄດ້ເຮັດຊົ່ວເລີຍ
ຢ່າໄດ້ດຳເນີນທາງຜິດເລີຍ
ຖ້າສະຫາຍປາຖະໜາຄວາມສຸກເມື່ອຕາຍໄປ
ຈົ່ງງົດເວັ້ນການຂ້າສັດເຊິ່ງເປັນການບໍ່ສັງລວມສາເທີ້ນ

[໔໗໓] ຂ້ານ້ອຍຟັງຄຳຂອງເຂົາຜູ້ຫວັງດີ
ມີຄວາມອີດູດ້ວຍປະໂຫຍດເກື້ອກູນ
ແຕ່ບໍ່ໄດ້ເຮັດຕາມຄຳສັ່ງສອນຂອງເຂົາທັງໝົດ
ຍ້ອນເປັນຄົນບໍ່ມີປັນຍາ ຍິນດີໃນບາບມາດົນນານ

[໔໗໔] ເຂົາມີປັນຍາກວ້າງຂວາງຄືແຜ່ນດິນ
ແນະນຳຂ້ານ້ອຍໃຫ້ຕັ້ງຢູ່ໃນຄວາມສັງລວມດ້ວຍອະນຸເຄາະອີກວ່າ
ຖ້າທ່ານຈະຂ້າສັດໃນເວລາກາງເວັນ
ໃນເວລາກາງຄືນກໍຈົ່ງງົດເວັ້ນສາ

[໔໗໕] ຂ້ານ້ອຍນັ້ນຈຶ່ງຂ້າສັດແຕ່ສະເພາະກາງເວັນ
ກາງຄືນເປັນຜູ້ສັງລວມງົດເວັ້ນ
ຍ້ອນແນວນັ້ນ ກາງຄືນຂ້ານ້ອຍຈຶ່ງໄດ້ຮັບການບຳລຸງປິ່ນເປີ
ກາງເວັນປະສົບທຸກ ຖືກໝາຫຸ້ມກັດກິນ ຄື

[໔໗໖] ກາງຄືນໄດ້ສະເຫວີຍທິບພະສົມບັດດ້ວຍຜົນແຫ່ງກຸສົນກຳນັ້ນ
ກາງເວັນຝູງໝາດຸຮ້າຍພາກັນແລ່ນເຂົ້າມາກັດກິນຂ້ານ້ອຍຮອບດ້ານ

[໔໗໗] ຊົນເຫຼົ່າໃດມີຄວາມພຽນເນືອງ ໆ

ເອົາທຸລະໃນພຣະສາດສະໜາຂອງພຣະສຸຄົດເຈົ້າຢ່າງໝັ້ນຄົງ
ຂ້ານ້ອຍເຂົ້າໃຈວ່າ ຊົນເຫຼົ່ານັ້ນແລຈະໄດ້ບັນລຸອະມະຕະບົດ
ເຊິ່ງປັດໄຈອັນໃດ ໆ ປຸງແຕ່ງບໍ່ໄດ້ຢ່າງແນ່ນອນ

**ມິຄະລຸດທະກະເປຕະວັດຖຸທີ ໗ ຈົບ**

## ໘. ທຸຕິຍະມິຄະລຸດທະກະເປຕະວັດຖຸ

## ເລື່ອງເຜດນາຍພານເນື້ອ ເລື່ອງທີ ໒

(ພຣະນາຣະທະເຖຣະຖາມເຜດຕົນໜຶ່ງວ່າ)

[໔໘໘] ທ່ານອອນຊອນຢູ່ເທິງບັນລັງ
ທີ່ໃນເຮືອນຍອດແລະຜາສາດປູລາດດ້ວຍຜ້າຂົນສັດ
ດ້ວຍດົນຕີເຄື່ອງຫ້າເຊິ່ງບຸກຄົນບັນເລງແລ້ວຢ່າງມ່ວນ

[໔໘໙] ພາຍຫຼັງ ເມື່ອສິ້ນຣາຕີ ດວງອາທິດຂຶ້ນ (ຈົນ)ດວງອາທິດຕົກ
ທ່ານເຂົ້າໄປປະສົບທຸກຫຼວງຫຼາຍຢູ່ໃນປ່າຊ້າ

[໔໙໐] ແຕ່ກ່ອນທ່ານໄດ້ເຮັດກຳຊົ່ວທາງກາຍ ວາຈາ ໃຈອັນໃດໄວ້ນໍ
ຍ້ອນຜົນກຳອັນໃດ ທ່ານຈຶ່ງຕ້ອງປະສົບທຸກແນວນີ້

(ເຜດນັ້ນຕອບວ່າ)

[໔໙໑] ເມື່ອຊາດກ່ອນ ຂ້ານ້ອຍເປັນນາຍພານເນື້ອ
ເປັນຄົນຫຍາບຊ້າ ທາລຸນ ບໍ່ສັງລວມ
ຢູ່ທີ່ພູຄິຣິບພະຊະ ເປັນທີ່ໜ້າອອນຊອນ
ໃກ້ນະຄອນຣາດຊະຄືເຊິ່ງໜ້າອອນຊອນ

[໔໙໒] ຂ້ານ້ອຍນັ້ນມີສະຫາຍໃຈດີ ມີສັດທາ ເປັນອຸປາສົກຄົນໜຶ່ງ
ເຂົາມີພິກຂຸທີ່ຄຸ້ນເຄີຍກັນ ເຊິ່ງເປັນສາວົກຂອງພຣະສະມະນະໂຄດົມ
ຍ້ອນເຂົາອີດູຂ້ານ້ອຍຈຶ່ງຫ້າມຢູ່ເລື້ອຍ ໆ ວ່າ

[໔໙໓] ສະຫາຍເອີຍ ຢ່າໄດ້ເຮັດຊົ່ວເລີຍ
ຢ່າໄດ້ດຳເນີນທາງຜິດເລີຍ
ຖ້າສະຫາຍປາຖະໜາຄວາມສຸກເມື່ອຕາຍໄປ

ຈຶ່ງງົດເວັ້ນຈາກການຂ້າສັດ ເຊິ່ງເປັນການບໍ່ສັງລວມສາເທີ້ນ

[໔໙໔] ຂ້ານ້ອຍຟັງຄຳຂອງເຂົາຜູ້ຫວັງດີ ມີຄວາມອີດູດ້ວຍປະໂຫຍດເກື້ອກູນ
ແຕ່ບໍ່ໄດ້ເຮັດຕາມຄຳສັ່ງສອນຂອງເຂົາທັງໝົດ
ຍ້ອນເປັນຄົນບໍ່ມີປັນຍາ ຍິນດີໃນບາບມາດົນນານ

[໔໙໕] ເຂົາມີປັນຍາກວ້າງຂວາງຄືແຜ່ນດິນ
ແນະນຳຂ້ານ້ອຍໃຫ້ຕັ້ງຢູ່ໃນຄວາມສັງລວມດ້ວຍຄວາມອະນຸເຄາະອີກວ່າ
ຖ້າທ່ານຈະຂ້າສັດໃນເວລາກາງເວັນ
ໃນເວລາກາງຄືນກໍຈົ່ງງົດເວັ້ນສາ

[໔໙໖] ຂ້ານ້ອຍນັ້ນຈຶ່ງຂ້າສັດແຕ່ສະເພາະກາງເວັນ
ກາງຄືນເປັນຜູ້ສັງລວມງົດເວັ້ນ
ຍ້ອນແນວນັ້ນ ກາງຄືນຂ້ານ້ອຍຈຶ່ງໄດ້ຮັບຄວາມສຸກ
ກາງເວັນປະສົບທຸກ ຖືກໝາຫຸ້ມກັດກິນ ຄື

[໔໙໗] ກາງຄືນໄດ້ສະເຫວີຍທິບພະສົມບັດດ້ວຍຜົນແຫ່ງກຸສົນກຳນັ້ນ
ກາງເວັນຝູງໝາດຸຮ້າຍພາກັນແລ່ນເຂົ້າມາກັດກິນຂ້ານ້ອຍຮອບດ້ານ
[໔໙໘] ຊົນເຫຼົ່າໃດມີຄວາມພຽນເນືອງ ໆ
ເອົາທຸລະໃນພຣະສາດສະໜາຂອງພຣະສຸຄົດເຈົ້າຢ່າງໝັ້ນຄົງ
ຂ້ານ້ອຍເຂົ້າໃຈວ່າ ຊົນເຫຼົ່ານັ້ນແລຈະໄດ້ບັນລຸອະມະຕະບົດ
ເຊິ່ງປັດໄຈອັນໃດປຸງແຕ່ງບໍ່ໄດ້ຢ່າງແນ່ນອນ

ທຸຕິຍະມິຄະລຸດທະກະເປຕະວັດຖຸທີ ໘ ຈົບ

## ໙. ກູຕະວິນິດສະຍິກະເປຕະວັດຖຸ

## ເລື້ອງເຜດອະດີດຜູ້ພິພາກສາໂກງ

(ພຣະນາຣະທະເຖຣະຖາມເຜດຕົນໜຶ່ງວ່າ)

[໔໙໙] ໂຕທ່ານທັດຊົງດອກໄມ້ ໃສ່ຊະດາ ໃສ່ກຳໄລຄຳ
ລູບທາດ້ວຍຈຸນແກ່ນຈັນ
ທ່ານມີສີໜ້າຜ່ອງໃສ ງົດງາມ ຄືແສງດວງອາທິດອ່ອນ ໆ

[໕໐໐] ທ່ານມີເທບພະບຸດແລະເທບທິດາ ພວກລະ ໑໐,໐໐໐ ໃສ່ກຳໄລຄຳ
ນຸ່ງຫົ່ມຜ້າຂິບດ້ວຍຄຳ ພວກລະ ໑໐,໐໐໐ ຖ້າບຳລຸງປົນເປີ

[໕໐໑] ທ່ານມີອານຸພາບຫຼາຍ ມີຮູບຊວນໃຫ້ເກີດຂົນລຸກແກ່ຜູ້ພົບເຫັນ
ແຕ່ທ່ານຈິກຊີ້ນຫຼັງຂອງຕົນເອງກິນເປັນອາຫານ

[໕໐໒] ແຕ່ກ່ອນທ່ານໄດ້ເຮັດກຳຊົ່ວທາງກາຍ ວາຈາ ໃຈອັນໃດໄວ້ນໍ
ຍ້ອນຜົນກຳອັນໃດ ທ່ານຈຶ່ງຈິກຊີ້ນຫຼັງຂອງຕົນເອງກິນເປັນອາຫານ

(ເຜດນັ້ນຕອບວ່າ)

[໕໐໓] ຂ້ານ້ອຍໄດ້ປະພຶດທຸດຈະຣິດດ້ວຍການເວົ້າສັບສໍ່ ເວົ້າຕົວະ ແລະ
ດ້ວຍການເຊື່ອງຫຼອກລວງເພື່ອຄວາມສູນຫາຍແກ່ຕົນເອງໃນມະນຸດສາໂລກ
[໕໐໔] ໃນມະນຸດສາໂລກນັ້ນ ຂ້ານ້ອຍໄປສູ່ຊຸມຊົນແລ້ວ
ເມື່ອເຖິງເວລາທີ່ຈະເວົ້າຄວາມຈິງ ລະເຫດຜົນສາ
ປະພຶດຄວນຕາມອະທຳ

[໕໐໕] ຜູ້ປະພຶດທຸດຈະຣິດມີເວົ້າສັບສໍ່ເປັນຕົ້ນ ຍ່ອມຈິກຊີ້ນຫຼັງຕົນເອງກິນ
ຄືຂ້ານ້ອຍຈິກຊີ້ນຫຼັງຕົນເອງກິນຢູ່ໃນມື້ນີ້

[໕໐໖] ຂ້າແດ່ພຣະນາຣະທະ ທຸກທີ່ຂ້ານ້ອຍໄດ້ຮັບຢູ່ນີ້ ທ່ານໄດ້ເຫັນເອງແລ້ວ
ເຫຼົ່າຊົນຜູ້ສະຫຼາດ ມີຄວາມອະນຸເຄາະ ເພິ່ງກ່າວສອນວ່າ
ທ່ານຢ່າໄດ້ເວົ້າສັບສໍ່ ແລະຢ່າໄດ້ເວົ້າຕົວະ
ຢ່າໄດ້ກິນຊີ້ນຫຼັງຂອງຕົນເປັນອາຫານເລີຍ

**ກູຕະວິນິດສະຍິກະເປຕະວັດຖຸທີ ໙ ຈົບ**

## ໑໐. ທາຕຸວິວັນນະເປຕະວັດຖຸ

## ເລື້ອງເຜດຜູ້ຕຳໜິການບູຊາພຣະທາດ

(ພຣະມະຫາກັດສະປະເຖຣະຖາມເຜດຕົນໜຶ່ງວ່າ)

[໕໐໗] ທ່ານຢູ່ໃນອາກາດ ມີກິ່ນເໝັນເນົ່າຟຸ້ງໄປ
ແລະໝູ່ໜອນພາກັນຊອນໄຊກິນປາກທີ່ມີກິ່ນເໝັນເນົ່າຂອງທ່ານ
ແຕ່ກ່ອນທ່ານໄດ້ເຮັດກຳອັນໃດໄວ້

[໕໐໗] ຍ້ອນການຟຸ້ງໄປແຫ່ງກິ່ນເໝັນນັ້ນ
ນາຍນິຣະຍະບານຖືອາວຸດມາປາດປາກທີ່ມີບາດຊ້ຳແລ້ວຊ້ຳອີກ
ເອົານ້ຳແສບທົດບ່ອນທີ່ປາດແລ້ວປາດຊ້ຳ ໆ

[໕໐໘] ແຕ່ກ່ອນທ່ານເຮັດກຳຊົ່ວທາງກາຍ ວາຈາ ໃຈອັນໃດໄວ້ນໍ
ຍ້ອນຜົນກຳອັນໃດ ທ່ານຈຶ່ງຕ້ອງປະສົບທຸກແນວນີ້

(ເຜດນັ້ນຕອບວ່າ)

[໕໑໐] ທ່ານຜູ້ນິຣະທຸກ (ແຕ່ກ່ອນ)ຂ້ານ້ອຍຢູ່ທີ່ພູຄິຣິບພະຊະ
ເປັນທີ່ໜ້າອອນຊອນໃກ້ນະຄອນຣາດຊະຄືເຊິ່ງໜ້າອອນຊອນ
ເປັນເຈົ້າຂອງຊັບແລະເຂົ້າເປືອກຫຼວງຫຼາຍຍິ່ງ

[໕໑໑] ຂ້ານ້ອຍໄດ້ຫ້າມພັນລະຍາ ທິດາ
ແລະລູກໃພ້ຂອງຂ້ານ້ອຍນັ້ນ
ເຊິ່ງພາກັນນຳພວງມາໄລ
ດອກບົວ ແລະເຄື່ອງລູບທາໃໝ່ ໆ
ໄປເພື່ອບູຊາພຣະສະຖູບ
ບາບນັ້ນຂ້ານ້ອຍໄດ້ເຮັດໄວ້ແລ້ວ

[໕໑໒] ພວກເຮົາຈຶ່ງໄດ້ສະເຫວີຍທຸກຂະເວທະນາຕ່າງ ໆ ກັນ
ຈັກມີກໄໝ້ຢູ່ໃນນະຣົກແສນສາຫັດເຖິງ ໗໖,໐໐໐ ປີ
ຍ້ອນຕຳໜິການບູຊາພຣະສະຖູບ

[໕໑໓] ເມື່ອການບູຊາແລະການສະຫຼອງພຣະສະຖູບ
ຂອງພຣະອະຣະຫັນຕະສຳມາສຳພຸດທະເຈົ້າເປັນໄປຢູ່
ຊົນເຫຼົ່າໃດປະກາດໂທດ (ແຫ່ງການບູຊາພຣະສະຖູບຄືເຮົາ)
ທ່ານເພິ່ງຄັດຊົນເຫຼົ່ານັ້ນອອກຈາກບຸນນັ້ນ

[໕໑໔] ອັນໜຶ່ງ ເຊີນທ່ານເບິ່ງເທບທິດາເຫຼົ່ານີ້
ເຊິ່ງທັດຊົງດອກໄມ້ ຕົກແຕ່ງຮ່າງກາຍເທາະມາ
ພວກນາງຮັ່ງມີແລະມີບໍລິວານຍົດ
ສະເຫວີຍຜົນແຫ່ງການບູຊາດ້ວຍດອກໄມ້

[໕໑໕] ທ່ານຜູ້ມີປັນຍາທັງຫຼາຍໄດ້ເຫັນຜົນໜ້າອັດສະຈັນ

ໜ້າຂົນລຸກຂົນຊັນ ເຊິ່ງບໍ່ເຄີຍມີມາແລ້ວນັ້ນ
ຍ່ອມທຳການນອບນ້ອມ
ຂາບໄຫວ້ພຣະມະຫາມຸນີນັ້ນ

[໕໑໖] ຂ້ານ້ອຍຈາກເປຕະໂລກນີ້ໄປແລ້ວ
ໄດ້ຖືກຳເນີດເປັນມະນຸດ
ຈັກເປັນຜູ້ບໍ່ຜະໝາດ
ທຳການບູຊາພຣະສະຖູບຢູ່ປະຈຳ ໆ ແນ່ແທ້

**ທາຕຸວິວັນນະເປຕະວັດຖຸທີ ໑໐ ຈົບ**

**ຈູລະວັກທີ ໓ ຈົບ**

## ລວມເລື້ອງເຜດທີ່ມີໃນວັກນີ້ ຄື

# ໔. ມະຫາວັກ

## ໝວດໃຫຍ່

## ໑. ອຳພະສັກຂະຣະເປຕະວັດຖຸ

### ເລື້ອງເຈົ້າອຳພະສັກຂະຣະລິດສະຫວີກັບເຜດເປືອຍ

[໕໑໗] ຊາວເມືອງວັດຊີມີນະຄອນນາມວ່າໄພສາລີ
ໃນນະຄອນໄພສາລີນັ້ນ ມີກະສັດລິດສະຫວີ ພຣະນາມວ່າອຳພະສັກຂະຣະ[໑]
ໄດ້ທອດພຣະເນດເຫັນເຜດທີ່ພາຍນອກພຣະນະຄອນ
ມີພຣະປະສົງຈະຊົງຮູ້ເຫດ
ຈຶ່ງໄດ້ຕັດຖາມເຜດນັ້ນໃນບ່ອນນັ້ນນັ້ນເອງວ່າ

[໕໑໘] ບຸກຄົນທີ່ຖືກສຽບຢູ່ເທິງປາຍຫຼາວນີ້
ບໍ່ມີການນອນ ການນັ່ງ ການຍ່າງໄປຍ່າງມາ
ແລະການກິນ ການດື່ມ ການຫຍ້ຳກິນ ການນຸ່ງຫົ່ມຜ້າ
ແມ່ນຍິງປິ້ນເປີຂອງເຂົາກໍບໍ່ມີ

[໕໑໙] ຊົນເຫຼົ່າໃດເປັນຍາດ ເປັນມິດສະຫາຍເຊິ່ງເຄີຍເຫັນຫຼືເຄີຍໄດ້ຍິນກັນມາ
ເຄີຍອີດູກັນມາໃນການກ່ອນຂອງຜູ້ນີ້
ດຽວນີ້ຊົນເຫຼົ່ານັ້ນແມ່ນຈະຢ້ຽມຢາມເຂົາກໍບໍ່ໄດ້
ຍ້ອນວ່າຜູ້ນີ້ມີສະພາບທີ່ຊົນນັ້ນສະລະແລ້ວ

[໕໒໐] ຜູ້ທີ່ຕາຍແລ້ວຍ່ອມບໍ່ມີມິດສະຫາຍ
ພວກມິດສະຫາຍຮູ້ເຖິງຄວາມຂາດແຄນຈຶ່ງພາກັນປະຖິ້ມ
ແລະເຫັນປະໂຫຍດຈຶ່ງພາກັນຫ້ອມລ້ອມ
ສ່ວນຜູ້ທີ່ຮັ່ງມີດ້ວຍຊັບສົມບັດຍ່ອມມີມິດສະຫາຍຫຼວງຫຼາຍ

[໕໒໑] ຊີວິດຂອງບຸຣຸດທີ່ເສື່ອມຈາກເຄື່ອງອຸປະໂພກແລະບໍຣິໂພກທຸກຢ່າງຝືດເຄືອງ
ຖືກຫຼາວສຽບໂຕ ມີຮ່າງກາຍເປື້ອນເລືອດ
ຈັກດັບໃນມື້ນີ້ ຫຼືໃນມືອື່ນນີ້ເປັນແນ່
ຄືຍາດນ້ຳຄ້າງເຊິ່ງຕິດຢູ່ເທິງປາຍຫຍ້າ

[໕໔໔]	ຍັກ ເມື່ອເປັນແນວນີ້ ຍ້ອນເຫດໃດ
ທ່ານຈຶ່ງເວົ້າກັບບຸຣຸດຜູ້ໄດ້ຮັບຄວາມລຳບາກຢ່າງຍິ່ງ
ນອນຫງາຍຢູ່ເທິງຫຼາວດ້າມໄມ້ກະເດົາແນວນີ້ວ່າ
ບຸຣຸດຜູ້ຈະເລີນ ຂໍທ່ານຈົ່ງມີຊີວິດຢູ່ເທີ້ນ
ການມີຊີວິດຢູ່ທີ່ນັ້ນເປັນຄວາມປະເສີດ

(ເຜດນັ້ນຂາບທູນວ່າ)

[໕໔໓]	ຂ້າແດ່ພຣະຣາຊາ ຂ້າພຣະອົງຣະນຶກໄດ້ວ່າ ໃນຊາດກ່ອນ
ບຸຣຸດນີ້ເປັນຍາດສາຍໂລຫິດຂອງຂ້າພຣະອົງ
ກໍຂ້າພຣະອົງເຫັນແລ້ວ ມີຄວາມກະລຸນາຕໍ່ເຂົາວ່າ
ຂໍບຸຣຸດຜູ້ຊົ່ວຊາມນີ້ຢ່າຕົກນະຣົກເລີຍ

[໕໔໔]	ຂ້າແດ່ກະສັດລິດສະຫວີ ບຸຣຸດຜູ້ເຮັດກຳຊົ່ວນີ້ຕາຍຈາກອັດຕະພາບນີ້ແລ້ວ
ຈັກບັງເກີດໃນນະຣົກເຊິ່ງແໜ້ນໜາໄປດ້ວຍສັດຜູ້ກະທຳຄວາມຊົ່ວໄວ້
ເປັນນະຣົກດຸຮ້າຍ
ມີຄວາມຮ້ອນຮົນຫຼາຍ ເຜັດຮ້ອນ ເປັນຕາຢ້ານ

[໕໔໕]	ຫຼາວນີ້ແລຍັງດີກວ່ານະຣົກນັ້ນຫຼວງຫຼາຍຫຼາຍສ່ວນ
ຂໍບຸຣຸດນີ້ຢ່າຕົກນະຣົກ ເຊິ່ງມີແຕ່ທຸກໂດຍສ່ວນດຽວ
ເຜັດຮ້ອນ ເປັນຕາຢ້ານ ຮຸນແຮງຍິ່ງ

[໕໔໖]	ຍ້ອນຟັງຄຳຂອງຂ້າພຣະອົງນີ້ແລ້ວ ບຸຣຸດນີ້ເປັນຄືກັບວ່າ
ນ້ອມຈິດເຂົ້າໄປຫາທຸກໃນນະຣົກ ເພິ່ງລະບາບໄດ້
ຍ້ອນແນວນັ້ນ ຂ້າພຣະອົງຈະບໍ່ເວົ້າໃນບ່ອນໃກ້ເຂົາດ້ວຍຫວັງວ່າ
ຊີວິດຂອງບຸຣຸດນີ້ຈົ່ງຢ່າດັບໄປຍ້ອນຂ້າພຣະອົງແຕ່ຜູ້ດຽວ

(ເມື່ອເຜດສະແດງຄວາມປະສົງຂອງຕົນແນວນີ້ແລ້ວ ພຣະຣາຊາຊົງຂໍໂອກາດເພື່ອຈະຕັດຖາມຄວາມເປັນໄປຂອງເຜດນັ້ນອີກ ຈຶ່ງໄດ້ຕັດຄາຖານີ້ວ່າ)

[໕໔໗]	ເລື້ອງຂອງບຸຣຸດນີ້ ເຮົາຮູ້ແລ້ວ
ແຕ່ເຮົາປາຖະໜາຈະຖາມທ່ານເຖິງເລື້ອງອື່ນແດ່
ຖ້າທ່ານໃຫ້ໂອກາດແກ່ເຮົາ
ເຮົາຈະຖາມ ແລະທ່ານບໍ່ຄວນໂກດເຮົາ

(ເພດນັ້ນຂາບທູນວ່າ)

[໕໔໗] ຂ້າພຣະອົງໄດ້ໃຫ້ປະຕິຍານໄວ້ໃນການນັ້ນແນ່ນອນແລ້ວ
ຈະບໍ່ບອກແກ່ຜູ້ທີ່ບໍ່ເຫຼື້ອມໃສ
(ແຕ່ບັດນີ້)ຂ້າພຣະອົງບໍ່ປະສົງ(ຈະບອກ)
(ແຕ່)ມີວາຈາທີ່ຄວນເຊື່ອຖືໄດ້ ຍ້ອນເຫດດັ່ງວ່າມານີ້
ຂໍເຊີນພຣະອົງຕັດຖາມຂ້າພຣະອົງຕາມພຣະປະສົງ
ຂ້າພຣະອົງຈະທູນຕອບທໍ່ທີ່ຈະທູນຕອບໄດ້

(ເມື່ອເພດໃຫ້ໂອກາດເຊັ່ນນັ້ນແລ້ວ ເຈົ້າອຳພະສັກຂະຣະລິດສະຫວິຈຶ່ງຕັດຖາມວ່າ)

[໕໔໙] ເຮົາຈະເຊື່ອທຸກສິ່ງທຸກຢ່າງທີ່ເຫັນດ້ວຍຕາ
ຖ້າແມ້ນເຮົາເຫັນສິ່ງນັ້ນແລ້ວບໍ່ເຊື່ອ
ກໍຂໍໃຫ້ລົງໂທດຖອດຍົດເຮົາເທີ້ນ ຍັກ

(ເພດນັ້ນຂາບທູນວ່າ)

[໕໓໐] ນີ້ຂໍຈົ່ງເປັນສັດປະຕິຍານຂອງພຣະອົງຕໍ່ຂ້າພຣະອົງ
ພຣະອົງໄດ້ຊົງຟັງທຳແລ້ວ ຈົ່ງຊົງໄດ້ຄວາມເຫຼື້ອມໃສດີງາມ
ຂ້າພຣະອົງຕ້ອງການຮູ້ ບໍ່ໄດ້ມີຈິດຄິດປະທຸດສະຮ້າຍ
ຈັກຂໍຂາບທູນຖວາຍທຸກເລື້ອງທີ່ພຣະອົງໄດ້ສະດັບແລ້ວແດ່
ບໍໄດ້ສະດັບແລ້ວແດ່ ແດ່ພຣະອົງ ທໍ່ທີ່ຮູ້ມາ
(ເຈົ້າອຳພະສັກຂະຣະລິດສະຫວິຕັດວ່າ)

[໕໓໑] ທ່ານຂີ່ມ້າຂາວປະດັບປະດາແລ້ວ
ເຂົ້າໄປໃກ້ບຸຣຸດທີ່ຖືກສຽບດ້ວຍຫຼາວ
ຍານນີ້ໜ້າອັດສະຈັນ ໜ້າເບິ່ງ ໜ້າຊົມ ນີ້ເປັນຜົນກຳອັນໃດ

(ເພດນັ້ນຂາບທູນວ່າ)

[໕໓໔] ທີ່ທ່າມກາງເມືອງໄພສາລີນັ້ນ
ມີຂຸມທີ່ຫີນທາງມື່ນ ຂ້າພຣະອົງມີຈິດເຫຼື້ອມໃສ
ຈຶ່ງໃສ່ຫົວງົວຫົວໜຶ່ງລົງໄປໃນຂຸມໃຊ້ເປັນຂົວ

[໕໓໓] ຂ້າພຣະອົງແລະບຸກຄົນອື່ນ

ຢຽບເທິງຫົວງົວນັ້ນຍ່າງຂ້າມໄປໄດ້
ຍານນີ້ໜ້າອັດສະຈັນ ໜ້າເບິ່ງ ໜ້າຊົມ ນີ້ເປັນຜົນກຳນັ້ນ

(ເຈົ້າອຳພະສັກຂະຣະລິດສະຫວິຕັດຖາມວ່າ)

[໕໓໔] ທ່ານມີຣັດສະໝີກາຍສະຫວ່າງສະໄຫວທົ່ວທຸກທິດ
ແລະມີກິ່ນຫອມຟຸ້ງໄປທົ່ວທຸກທິດ
ເຂົ້າເຖິງເທວະລິດ ມີອານຸພາບຫຼາຍ
ແຕ່ຍັງເປືອຍກາຍຢູ່ ນີ້ເປັນຜົນກຳອັນໃດ

(ເຜດນັ້ນຂາບທູນວ່າ)

[໕໓໕] ແຕ່ກ່ອນ ຂ້າພຣະອົງບໍ່ເປັນຄົນມັກໂກດ ມີຈິດຜ່ອງໃສຢູ່ປະຈຳ
ເວົ້າກັບຄົນທົ່ວໄປດ້ວຍວາຈາອ່ອນຫວານ ດ້ວຍຜົນກຳນັ້ນ
ຂ້າພຣະອົງຈຶ່ງມີຣັດສະໝີກາຍເປັນທິບ ສະຫວ່າງສະໄຫວຢູ່ເນືອງນິດ

[໕໓໖] ຂ້າພຣະອົງເຫັນຍົດແລະຊື່ສຽງຂອງຜູ້ທີ່ຕັ້ງຢູ່ໃນທຳ
ມີຈິດເຫຼື້ອມໃສ ກ່າວສັນເສີນ ດ້ວຍຜົນກຳນັ້ນ
ຂ້າພຣະອົງຈຶ່ງມີກິ່ນທິບຟຸ້ງໄປເນືອງ ໆ

[໕໓໗] ເມື່ອພວກສະຫາຍຂອງຂ້າພຣະອົງອາບນ້ຳທີ່ທ່ານ້ຳ
ຂ້າພຣະອົງລັກເອົາຜ້າທີ່ເຂົາເຊື່ອງໄວ້ເທິງບົກ
ມີຄວາມປະສົງຈະຢອກຫຼິ້ນ ແຕ່ບໍ່ໄດ້ມີຈິດຄິດປະທຸດສະຮ້າຍ
ຍ້ອນກຳນັ້ນຂ້າພຣະອົງຈຶ່ງເປັນເຜດເປືອຍກາຍ
ແລະເປັນຢູ່ຢ່າງຝືດເຄືອງ

(ເຈົ້າອຳພະສັກຂະຣະລິດສະຫວິຕັດຖາມວ່າ)

[໕໓໘] ຜູ້ທີ່ເຮັດບາບຫຼິ້ນ ໆ (ໂດຍເຫັນແກ່ຄວາມສະນຸກ)
ນັກປາດຍັງກ່າວວ່າມີຜົນກຳເຖິງພຽງນີ້
ແລ້ວຜູ້ທີ່ຈົງໃຈເຮັດບາບເດ
ນັກປາດໄດ້ກ່າວວ່າຈະມີຜົນກຳສ່ຳໃດ
(ເຜດນັ້ນຂາບທູນວ່າ)

[໕໓໙] ມະນຸດທັງຫຼາຍມີໃຈດຳຣິຊົ່ວຮ້າຍ

ເປັນຜູ້ເສົ້າໝອງທັງທາງກາຍ ທັງທາງວາຈາ
ຕາຍໄປຈະຕ້ອງຕົກນະຮົກໃນສຳປະຣາຍະພົບ ຢ່າງບໍ່ຕ້ອງສົງໄສ

[໔໔໐] ສ່ວນຊົນເຫຼົ່າອື່ນປາຖະໜາສຸກຄະຕິ
ຍິນດີໃຫ້ທານ ລ້ຽງອັດຕະພາບແລ້ວ
ເມື່ອຕາຍໄປ ຍ່ອມເຂົ້າເຖິງສຸກຄະຕິໃນສຳປະຣາຍະພົບຢ່າງບໍ່ຕ້ອງສົງໄສ

(ເມື່ອເຜດຊີ້ແຈ່ງຈຳແນກຜົນກຳແຕ່ໂດຍຫຍໍ້ແນວນີ້ ພຣະຣາຊາບໍ່ຊົງເຊື່ອຈຶ່ງຕັດຖາມວ່າ)

[໔໔໑] ເຮົາຈະເພິ່ງຮູ້ເລື້ອງນັ້ນໂດຍບໍ່ຕ້ອງອາໄສບຸກຄົນອື່ນແນວໃດວ່າ
ນີ້ເປັນຜົນກຳດີແລະກຳຊົ່ວ
ເຮົາເຫັນອັນໃດແລ້ວຈຶ່ງຄວນເຊື່ອ
ຫຼືໃຜແດ່ຈະເພິ່ງຊ່ອຍຊີ້ແຈ່ງໃຫ້ເຮົາເຊື່ອເລື້ອງນັ້ນໄດ້

(ເຜດນັ້ນຂາບທູນວ່າ)

[໔໔໔] ພຣະອົງຊົງເຫັນແລະຊົງສະດັບມາແລ້ວກໍຈົ່ງຊົງເຊື່ອເທີ້ນວ່າ
ນີ້ເປັນຜົນກຳດີແລະກຳຊົ່ວ
ເມື່ອກຳດີແລະກຳຊົ່ວທັງສອງບໍ່ມີ
ສັດທັງຫຼາຍທີ່ໄປສູ່ສຸກຄະຕິຫຼືທຸກຄະຕິຈະມີໄດ້ແນວໃດນໍ

[໔໔໓] ຖ້າສັດທັງຫຼາຍໃນມະນຸດສາໂລກນີ້ ບໍ່ເພິ່ງເຮັດກຳດີແລະກຳຊົ່ວ
ເຫຼົ່າສັດໃນມະນຸດສາໂລກທີ່ຈະໄປສູ່ສຸກຄະຕິຫຼືທຸກຄະຕິ
ຊົ່ວແດ່ ປະນີດແດ່ ກໍມີບໍ່ໄດ້

[໔໔໔] ແຕ່ຍ້ອນສັດທັງຫຼາຍໃນມະນຸດສາໂລກ
ໄດ້ເຮັດກຳດີແລະກຳຊົ່ວໄວ້
ດັ່ງນັ້ນ ສັດທັງຫຼາຍໃນມະນຸດສາໂລກຈຶ່ງໄປສຸກຄະຕິຫຼືທຸກຄະຕິ
ຊົ່ວແດ່ ປະນີດແດ່

[໔໔໕] ບັນດິດທັງຫຼາຍໄດ້ກ່າວກຳ
ອັນເປັນເຫດໃຫ້ສະເຫວີຍສຸກແລະທຸກໄວ້ທັງສອງຢ່າງ
ເທວະດາເຫຼົ່ານັ້ນຫ້ອມລ້ອມເຫຼົ່າຊົນທີ່ໄດ້ຮັບຜົນອັນເປັນເຫດໃຫ້ສະເຫວີຍສຸກ
ສ່ວນພວກຄົນພານມັກບໍ່ເຫັນກຳແລະຜົນກຳທັງສອງ
ຈຶ່ງຖືກກຳແຜດເຜົາຢູ່

[໕໔໖] ຂ້າພຣະອົງບໍ່ໄດ້ມີບຸນກຳທີ່ເຮັດໄວ້ດ້ວຍຕົນເອງ
ທັງບໍ່ມີຜູ້ທີ່ຈະເພິ່ງຖວາຍຜ້ານຸ່ງ ຜ້າຫົ່ມ ບ່ອນນອນ ເຂົ້າແລະນ້ຳ ແລ້ວອຸທິດໃຫ້
ເຫດນັ້ນຂ້າພຣະອົງຈຶ່ງເປັນເຜດເປືອຍກາຍ
ມີຄວາມເປັນຢູ່ຢ່າງຝືດເຄືອງ

(ເຈົ້າອຳພະສັກຂະຣະລິດສະຫວິຕັດຖາມວ່າ)

[໕໔໗] ທ່ານຍັກ ຈະເພິ່ງມີເຫດອັນໃດ ໆ ແດ່ນໍ
ທີ່ຈະເຮັດໃຫ້ທ່ານໄດ້ເຄື່ອງນຸ່ງຫົ່ມ
ເຊີນບອກເຮົາໄດ້ ຖ້າມີເຫດ
ເຮົາຮັບຟັງຄຳທີ່ມີເຫດຄວນເຊື່ອຖືໄດ້

(ເຜດນັ້ນຂາບທູນວ່າ)

[໕໔໘] ເມືອງໄພສາລີນີ້ ມີພິກຂຸນາມວ່າກັບປິຕະກະ[๑]
ສຳເລັດຊານ ມີສີນບໍລິສຸດ ເປັນພຣະອະຣະຫັນ ລຸດພົ້ນແລ້ວ
ຄຸ້ມຄອງອິນຊີໄດ້ ສັງລວມໃນພຣະປາຕິໂມກ
ເຢືອກເຢັນ ມີສຳມາທິດຖິອັນສູງສຸດ

[໕໔໙] ເປັນຜູ້ອ່ອນໂຍນ ຮູ້ຄວາມປະສົງຂອງຜູ້ຂໍ ວ່າງ່າຍ
ມີໜ້າເບີກບານ ມາດີ ໄປດີ ເວົ້າໂຕ້ຕອບໄດ້ດີ
ເປັນເນື້ອນາບຸນ ມີເມດຕາຈິດຢູ່ສະເໝີ
ແລະເປັນທັກຂີໄນຍະບຸກຄົນຂອງເທວະດາແລະມະນຸດທັງຫຼາຍ

[໕໕໐] ສະງົບລະງັບ ກຳຈັດມິດສາວິຕົກໄດ້
ໝົດທຸກ ໝົດຕັນຫາ
ລຸດພົ້ນແລ້ວ ປາສະຈາກກິເລດເປັນເຫດສຽບແທງ
ບໍ່ຍຶດຖືວ່າເປັນຂອງເຮົາ ບໍ່ຄົດ ບໍ່ມີອຸປະທິ
ໝົດສິ້ນກິເລດເປັນເຫດລ້າຊ້າ
ໄດ້ບັນລຸວິດຊາ ໓ ມີຄວາມຮຸ່ງເຮືອງ
[໕໕໑] ບໍ່ມີຊື່ສຽງຜາກົດ ແມ່ນໃຜ ໆ ເຫັນກໍບໍ່ຮູ້ວ່າເປັນປາດ
ໃນໝູ່ຊົນຊາວວັດຊີ ເຂົາພາກັນຮຽກທ່ານວ່າ ປາດ
ສ່ວນພວກຍັກແລະເທວະດາຮູ້ຈັກທ່ານວ່າ ຜູ້ບໍ່ຫວັ່ນໄຫວ
ມີກັນລະຍານະທຳ ທ່ຽວໄປໃນໂລກ

[໕໕໒] ຖ້າພຣະອົງຊົງຖວາຍຜ້າຄູ່ໜຶ່ງຫຼືສອງຄູ່ແກ່ພຣະມຸນີນັ້ນ
ຊົງອຸທິດສ່ວນບຸນໃຫ້ຂ້າພຣະອົງ
ພຣະມຸນີນັ້ນຈະເພິ່ງຮັບຄູ່ຜ້າເຫຼົ່ານັ້ນ
ແລະພຣະອົງກໍຈະທອດພຣະເນດເຫັນຂ້າພຣະອົງຜູ້ນຸ່ງຫົ່ມຜ້າຮຽບຮ້ອຍ

(ເຈົ້າອຳພະສັກຂະຣະລິດສະຫວິຕັດຖາມວ່າ)

[໕໕໓] ບັດນີ້ ສະມະນະນັ້ນຢູ່ບ່ອນໃດ
ເຮົາໄປແລ້ວຈັກເພິ່ງພົບເຫັນໄດ້
ແລະສະມະນະນັ້ນ ຄືໃຜ ຈະເພິ່ງແກ້ໄຂຄວາມສົງໄສແລະຄວາມສົນເທ
ເຊິ່ງເປັນສັງນໜາມແຫ່ງຄວາມເຫັນໃນມື້ນີ້ໄດ້

(ເຜດນັ້ນຂາບທູນວ່າ)

[໕໕໔] ທ່ານນັ່ງຢູ່ທີ່ກະປິນັດຈະນານັ້ນ
ມີເທວະດາຫ້ອມລ້ອມເປັນຈຳນວນຫຼາຍ
ເປັນຜູ້ມີກຽດຕິຄຸນອັນແທ້ຈິງ
ແລະເປັນຜູ້ບໍ່ຜະໝາດໃນຄຸນອັນອັດສະຈັນຂອງຕົນ
ກ່າວທຳມີກະຖາ

(ເຈົ້າອຳພະສັກຂະຣະລິດສະຫວິຕັດວ່າ)

[໕໕໕] ເຮົາໄປແລ້ວຈັກເຮັດຕາມທີ່ທ່ານສັ່ງນັ້ນດ່ຽວນີ້
ຈັກໃຫ້ສະມະນະນຸ່ງຫົ່ມຜ້າຄູ່ໜຶ່ງ
ພຣະມຸນີນັ້ນຈະເພິ່ງຮັບຄູ່ຜ້າເຫຼົ່ານັ້ນ
ແລະເຮົາຈະເພິ່ງເຫັນທ່ານຜູ້ນຸ່ງຫົ່ມຜ້າຮຽບຮ້ອຍ

(ເຜດນັ້ນຂາບທູນວ່າ)

[໕໕໖] ຂ້າແດ່ ເຈົ້າລິດສະຫວີ ຂໍປະທານວະໂຣກາດ
ຂໍພຣະອົງຢ່າໄດ້ສະເດັດເຂົ້າໄປຫາບັນພະຊິດໃນເວລາບໍ່ສົມຄວນ
ນັ້ນເປັນທຳນຽມບໍ່ເໝາະສຳລັບພຣະອົງ
ແລະຕໍ່ຈາກນັ້ນ ພຣະເຈົ້າລິດສະຫວີຕັດວ່າ
ເຮົາຈະເຂົ້າໄປພົບບັນພະຊິດຜູ້ນັ່ງຢູ່ໃນບ່ອນລັບ ໃນບ່ອນນັ້ນໃນເວລາອັນສົມຄວນ

(ພຣະສັງຄີຕິກາຈານທັງຫຼາຍກ່າວຄາຖາເຫຼົ່ານີ້ວ່າ)

[໘໘໗] ເມື່ອຕັດແລ້ວແບບນີ້ ເຈົ້າລິດສະຫວີມີໝູ່ຂ້າທາດບໍຣິພານຫ້ອມລ້ອມ
ສະເດັດໄປໃນພຣະນະຄອນນັ້ນ
ເມື່ອສະເດັດເຂົ້າໄປສູ່ພຣະນະຄອນນັ້ນແລ້ວ
ຈຶ່ງສະເດັດເຂົ້າປະທັບອາໄສໃນພຣະຣາດຊະນິເວດຂອງພຣະອົງ

[໘໘໘] ຕໍ່ຈາກນັ້ນ ພຣະເຈົ້າລິດສະຫວີຊົງກະທຳກິດຂອງຄະລືຫັດທັງຫຼາຍ
ຊົງອາບນ້ຳ ແລະສະເຫວີຍນ້ຳແລ້ວ
ໄດ້ເວລາອັນສົມຄວນ ຈຶ່ງຊົງເລືອກຜ້າ ໘ ຄູ່ຈາກຫີບ
ຮັບສັ່ງໃຫ້ໝູ່ຂ້າທາດບໍຣິພານຖືໄປ

[໘໘໙] ພຣະອົງ ເມື່ອສະເດັດເຂົ້າໄປສູ່ສະຖານບ່ອນນັ້ນແລ້ວ
ໄດ້ທອດພຣະເນດເຫັນສະມະນະນັ້ນມີຈິດສະງົບລະງັບ
ຍ່າງກັບຈາກໂຄຈອນຄາມ ເປັນຜູ້ເຢືອກເຢັນ
ນັ່ງຢູ່ທີ່ເຫງົ້າຕົ້ນໄມ້

[໘໙໐] ຈຶ່ງສະເດັດເຂົ້າໄປຫາແລ້ວຕັດຖາມສະມະນະນັ້ນ
ເຖິງຄວາມເປັນຜູ້ມີອາພາດໜ້ອຍ ຄວາມຢູ່ສຸກສະບາຍ
ແລ້ວໄດ້ຕັດກັບສະມະນະນັ້ນວ່າ
ພຣະຜູ້ເປັນເຈົ້າຜູ້ຈະເລີນ ຂ້ານ້ອຍເປັນກະສັດລິດສະຫວີ ໃນເມືອງໄພສາລີ
ຊົນທັງຫຼາຍຮູ້ຈັກຂ້ານ້ອຍວ່າ ເຈົ້າອຳພະສັກຂະຣະລິດສະຫວີ

[໘໙໑] ພຣະຜູ້ເປັນເຈົ້າຜູ້ຈະເລີນ ຂໍພຣະຜູ້ເປັນເຈົ້າຈົ່ງຮັບຜ້າ ໘ ຄູ່ນີ້ຂອງຂ້ານ້ອຍ
ຂ້ານ້ອຍຖວາຍພຣະຜູ້ເປັນເຈົ້າ
ຂ້ານ້ອຍມາໃນບ່ອນນີ້ຍ້ອນຕ້ອງການຄວາມສະບາຍໃຈ
ທີ່ຂ້ານ້ອຍຈະເພິ່ງສະບາຍໃຈ

(ພຣະເຖຣະທູນຖາມວ່າ)

[໘໙໒] ສະມະນະພາມທັງຫຼາຍພາກັນລະເວັ້ນຣາດຊະນິເວດ
ຂອງມະຫາບໍພິດໃຫ້ຫ່າງໄກ
ຍ້ອນໃນພຣະຣາຊະນິເວດຂອງພຣະອົງ ບາດກໍແຕກ
ແລະແມ່ນຜ້າສັງຄາຕິກໍຍັງຖືກຈີກທຳລາຍ

[໕໖໓] ເມື່ອຕໍ່ມາ ສະມະນະອີກພວກໜຶ່ງຖືກມັດຕີນຈັບຫ້ອຍຫົວລົງ
ສະມະນະທັງຫຼາຍໄດ້ຮັບການບຽດບຽນ
ທີ່ມະຫາບໍພິດຊົງກະທຳກັບບັນພະຊິດເຊັ່ນນັ້ນ

[໕໖໔] ມະຫາບໍພິດບໍ່ເຄີຍພຣະຣາດຊະທານ
ແມ່ນແຕ່ນ້ຳມັນຈັກຢາດໜຶ່ງດ້ວຍຍອດຫຍ້າ
ບໍ່ຕັດບອກທາງໃຫ້ຄົນຫຼົງທາງ
ຊົງເອົາໄມ້ການເທົ້າຂອງຄົນຕາບອດສາເອງ
ເປັນຄົນຂີ້ຖີ່ ບໍ່ສັງລວມແນວນີ້
ເມື່ອເປັນແນວນີ້ ຍ້ອນເຫດໃດ
ຫຼືຍ້ອນຊົງເຫັນອັນໃດ
ມະຫາບໍພິດ ຈຶ່ງຊົງຈຳແນກແຈກຈ່າຍໃຫ້ແກ່ອາດຕະມານໍ

(ເຈົ້າອຳພະສັກໄໄໄກຂະຣະລິດສະຫວິຕັດວ່າ)

[໕໖໕] ພຣະຜູ້ເປັນເຈົ້າຜູ້ຈະເລີນ ຂ້ານ້ອຍບຽດບຽນສະມະນະແລະພາມທັງຫຼາຍ
ຂ້ານ້ອຍ ຂ້ານ້ອຍຜິດຕາມທີ່ທ່ານເວົ້າ
ແຕ່ຂ້ານ້ອຍມີຄວາມປະສົງຈະຢອກຫຼິ້ນ ບໍ່ໄດ້ຄິດປະທຸດສະຮ້າຍ
ກຳຊົ່ວແມ່ນນັ້ນຂ້ານ້ອຍກະທຳແລ້ວຈິງ

[໕໖໖] ເດັກໜຸ່ມເປືອຍກາຍ ມີໂພຄະພຽງເລັກໜ້ອຍ
ໄດ້ສ້າງບາບກຳດ້ວຍການຢອກຫຼິ້ນ ຈຶ່ງຕ້ອງສະເຫວີຍທຸກ
ກໍເຜດນັ້ນຈະມີທຸກອັນໃດນໍ
ທີ່ເປັນທຸກຍິ່ງກວ່າຄວາມເປືອຍກາຍນັ້ນ

[໕໖໗] ພຣະຜູ້ເປັນເຈົ້າຜູ້ຈະເລີນ ຂ້ານ້ອຍເຫັນສິ່ງອັນໜ້າສັງເວດ
ແລະຜືນອັນເປັນມົນທິນນັ້ນແລ້ວ
ຈຶ່ງຖວາຍທານແມ່ນຍ້ອນເຫດນັ້ນເປັນປັດໄຈ
ນິມົນພຣະຜູ້ເປັນເຈົ້າຮັບຜ້າທັງ ໘ ຄູ່ເທີ້ນ
ທັກຂິນາ໌ ນີ້ຈົ່ງສຳເລັດແກ່ເຜດ

(ພຣະເຖຣະຖວາຍພຣະພອນວ່າ)

[໕໖໘] ຍ້ອນບັນດິດທັງຫຼາຍມີພຣະສຳມາສຳພຸດທະເຈົ້າເປັນຕົ້ນ

ສັນເສີນການໃຫ້ທານໄວ້ສ່ວນຫຼາຍແທ້
ແລະເມື່ອມະຫາບໍພິດຊົງຖວາຍທານ ຂໍໃຫ້ທານຢ່າໝົດເປືອງໄປ
ອາດຕະມາພາບຮັບຜ້າຂອງມະຫາບໍພິດທັງ ໗ ຄູ່
ຂໍທັກຂີນາທານເຫຼົ່ານີ້ຈົ່ງສຳເລັດແກ່ເຜດ

[໕໖໙] ລຳດັບນັ້ນ ເຈົ້າລິດສະຫວີນັ້ນ ຊົງບ້ວນປາກ
ຊົງຖວາຍຜ້າ ໗ ຄູ່ແດ່ພຣະເຖຣະ ພຣະເຖຣະຮັບຜ້າ ໗ ຄູ່ນັ້ນແລ້ວ
ແລະເຈົ້າລິດສະຫວີນັ້ນກໍທອດພຣະເນດເຫັນເຜດນຸ່ງຫົ່ມຜ້າຮຽບຮ້ອຍ

[໕໗໐] (ເຈົ້າລິດສະຫວີນັ້ນ)ໄດ້ທອດພຣະເນດເຫັນເຜດນັ້ນ
ລູບທາດ້ວຍຈຸນແກ່ນຈັນແດງ ມີຮູບງາມ ປະດັບປະດາ
ນຸ່ງຜ້າຢ່າງດີ ຂີ່ມ້າອາຊາໄນ ມີບໍລິວານຫ້ອມລ້ອມ ມີເທວະລິດຫຼາຍ

[໕໗໑] ພຣະອົງຊົງເຫັນເຊັ່ນນັ້ນແລ້ວ ຊົງປີ້ມພຣະຫະໄທ ເບີກບານ
ມີພຣະຫະໄທແຈ່ມໃສ ງາມສະງ່າ
ໄດ້ຊົງເຫັນກຳແລະຜົນກຳຫຼາຍທີ່ແຈ້ງປະຈັກດ້ວຍພຣະອົງເອງ

[໕໗໒] ຈຶ່ງສະເດັດເຂົ້າໄປຫາເຜດນັ້ນແລ້ວຮັບສັ່ງກັບເຜດນັ້ນວ່າ
ເຮົາຈັກໃຫ້ທານແກ່ສະມະນະພາມທັງຫຼາຍ
ແນວໃດ ໆ ທີ່ເຮົາບໍ່ຄວນໃຫ້ບໍ່ມີເລີຍ
ແລະທ່ານມີອຸປະກາຣະແກ່ເຮົາຫຼາຍ

(ເຜດນັ້ນຂາບທູນວ່າ)

[໕໗໓] ຂ້າແດ່ເຈົ້າລິດສະຫວີ ພຣະອົງໄດ້ພຣະຣາດຊະທານສິ່ງຂອງແນວໜຶ່ງ
ແກ່ຂ້າພຣະອົງ ທານນັ້ນບໍ່ໄດ້ຂາດຜົນ
ຂ້າພຣະອົງນັ້ນເຊິ່ງເປັນອະມະນຸດ
ຈັກເປັນພະຍານຮ່ວມກັບພຣະອົງຜູ້ເປັນມະນຸດ
(ພຣະຣາຊາຕັດວ່າ)

[໕໗໔] ທ່ານເປັນໂຕຢ່າງ ເປັນໝູ່ກອງ ເປັນບ່ອນຍຶດໜ່ຽວ
ເປັນມິດແລະເປັນເທບຂອງເຮົາ
ເຮົາຂໍໄຫວ້ ອ້ອນວອນທ່ານ ຕ້ອງການຈະພົບທ່ານອີກ

(ເຜດຂາບທູນວ່າ)

[໕໗໕] ຖ້າພຣະອົງຈັກເປັນຜູ້ບໍ່ມີສັດທາ
ຍັງກະດ້າງກະເດື່ອງ ມີຈິດດຳເນີນໄປຜິດໆ
ຂໍເດຊະເຈົ້າລິດສະຫວີ ພຣະອົງຈັກບໍ່ໄດ້ເຫັນຂ້າພຣະອົງ
ແລະຂ້າພຣະອົງເຫັນພຣະອົງແລ້ວກໍຈັກບໍ່ເຈລະຈາດ້ວຍ

[໕໗໖] ແຕ່ຖ້າພຣະອົງຈັກຊົງເຄົາລົບທຳ
ຍິນດີບໍລິຈາກທານເຄື່ອງບຳລຸງອັດຕະພາບ
ເປັນຄືນ້ຳລ້າງຂອງສະມະນະພາມທັງຫຼາຍ
ຂໍເດຊະເຈົ້າລິດສະຫວີ ເມື່ອເປັນດັ່ງນີ້ ພຣະອົງຈັກໄດ້ເຫັນຂ້າພຣະອົງ

[໕໗໗] ແລະຂ້າພຣະອົງຈັກໄດ້ເຫັນໄດ້ເຈລະຈາກັບພຣະອົງ
ຂໍພຣະອົງໂຜດຊົງປ່ອຍບຸຣຸດນີ້ຈາກຫຼາວໂດຍໄວ
ຍ້ອນການມາຫາບຸຣຸດນີ້ເປັນເຫດ
ເຮົາທັງສອງໄດ້ເປັນພະຍານຮ່ວມກັນ
ຍ້ອນເຫດແຫ່ງບຸຣຸດຖືກສຽບທີ່ຫຼາວ ຂ້າພຣະອົງເຂົ້າໃຈວ່າ

[໕໗໘] ເຮົາທັງສອງນັ້ນໄດ້ເປັນພະຍານຮ່ວມກັນ
ຝ່າຍບຸຣຸດຖືກສຽບທີ່ຫຼາວນີ້ ຖືກປ່ອຍໂດຍໄວໂດຍທັນທີ
ແລ້ວປະພຶດທຳໂດຍເຄົາລົບ
ເພິ່ງພົ້ນຈາກນະຮົກນັ້ນແນ່ນອນ
ກຳທີ່ເອັ້ນການໃຫ້ຜົນໆ ກໍເພິ່ງມີໄດ້
[໕໗໙] ພຣະອົງສະເດັດເຂົ້າໄປຫາກັບປິຕະກະພິກຂຸແລ້ວ
ຊົງຖວາຍທານແກ່ທ່ານ ໃນເວລາທີ່ສົມຄວນ
ປະທັບນັ່ງໃກ້ແລ້ວເຊີນຕັດຖາມດ້ວຍປາກເອງ
ທ່ານຈັກທູນຄວາມຂໍ້ນັ້ນແກ່ພຣະອົງ

[໕໘໐] ພຣະອົງຊົງປະສົງບຸນ ແລະມີຈິດບໍ່ປະທຸດສະຮ້າຍ
ເຊີນສະເດັດເຂົ້າໄປຫາພິກຂຸນັ້ນແລ້ວຕັດຖາມເທີ້ນ
ທ່ານຈັກທູນທຳທັງທີ່ຊົງສະດັບແລ້ວ
ແລະຍັງບໍ່ໄດ້ຊົງສະດັບທັງໝົດແດ່ພຣະອົງຕາມຄວາມຮູ້

(ພຣະອົງຊົງສະດັບທຳແລ້ວຈັກໄດ້ຕັດບອກສຸກຄະຕິ)

[໕໘໑] ພຣະອົງຊົງເຈລະຈາຄວາມລັບໃນບ່ອນນັ້ນແລ້ວ

ໄດ້ເປັນພະຍານຮ່ວມກັບເຜດ ສະເດັດຫຼີກໄປ
ບັດແລ້ວພຣະອົງໄດ້ກ່າວກັບຂ້າຣາດຊະບໍຣິພານຂອງກະສັດລິດສະຫວີທັງຫຼາຍ
ເຊິ່ງນັ່ງປະຊຸມກັນຢູ່ໃກ້ ໆ ວ່າ

[໕໗໘] ທ່ານຜູ້ຈະເລີນທັງຫຼາຍ ໂຜດຟັງຄຳແນວໜຶ່ງຂອງຂ້າພະເຈົ້າ
ຂ້າພະເຈົ້າຈັກເລືອກພົບ ຈັກໄດ້ປະໂຫຍດ
ບຸຣຸດທີ່ຖືກສຽບທີ່ຫຼາວ ມີກຳຫຍາບຊ້າ
ຖືກລົງອາດຍາ ມີສະພາບທີ່ຈະຕ້ອງຕິດຢູ່ບໍ່ສິ້ນສຸດ

[໕໗໙] ເຂົາຖືກຫຼາວສຽບມາແນວນີ້ປະມານ ໒໐ ຣາຕີ
ຈະຕາຍຫຼືບໍ່ຕາຍ ເຮົາຈັກປ່ອຍເຂົາດ້ວຍຄວາມເຕັມໃຈ
ໝູ່ຊົນຈິ່ງອະນຸຍາດຕາມຄວາມພໍໃຈ

[໕໗໔] ພຣະອົງໂຜດຈິ່ງຟ້າວປ່ອຍບຸຣຸດນັ້ນແລະບຸຣຸດອື່ນໂດຍໄວ
ແລະໃຜນໍຈະເພິ່ງວ່າກ່າວພຣະອົງຜູ້ຊົງເຮັດແນວນັ້ນຢູ່ໄດ້
ພຣະອົງຊົງຮູ້ແນວໃດ ຂໍຈິ່ງຊົງເຮັດແນວນັ້ນ
ໝູ່ຊົນຍ່ອມອະນຸຍາດຕາມຄວາມພໍໃຈ

[໕໗໕] ເຈົ້າລິດສະຫວີນັ້ນສະເດັດເຂົ້າໄປສູ່ສະຖານບ່ອນນັ້ນແລ້ວ
ຊົງຟ້າວປ່ອຍບຸຣຸດທີ່ຖືກຫຼາວສຽບ
ແລະໄດ້ຕັດກັບບຸຣຸດນັ້ນວ່າ ຢ່າຢ້ານເລີຍສະຫາຍ
ແລະຮັບສັ່ງໃຫ້ພວກໝໍປິ່ນປົວຮັກສາ

[໕໗໖] ແລ້ວສະເດັດເຂົ້າໄປຫາກັບປີຕະກະພິກຂຸ
ຊົງຖວາຍທານແກ່ທ່ານໃນເວລາທີ່ສົມຄວນ
ມີພຣະປະສົງຈະຊົງຮູ້ເຫດ ຈຶ່ງປະທັບນັ່ງໃກ້
ແລ້ວໄດ້ຮັບສັ່ງຖາມທ່ານ ໃນບ່ອນນັ້ນນັ້ນແລດ້ວຍພຣະອົງເອງວ່າ

[໕໗໗] ບຸຣຸດຜູ້ຖືກຫຼາວສຽບ ມີກຳຫຍາບຊ້າ
ຖືກລົງອາດຍາ ມີສະພາບຈະຕ້ອງຕິດຢູ່ບໍ່ສິ້ນສຸດ
ເຂົາຖືກສຽບແນວນີ້ປະມານ ໒ ໐ ຣາຕີ ຈະຕາຍຫຼືບໍ່ຕາຍ

[໕໗໘] ຂ້ານ້ອຍໄປປ່ອຍເຂົາມາດັ່ງວນີ້ຕາມຄຳຂອງເຜດນັ້ນ
ພຣະຜູ້ເປັນເຈົ້າຜູ້ຈະເລີນ ຈະເພິ່ງມີເຫດອັນໃດນໍ
ທີ່ເຜດນັ້ນບໍ່ຕ້ອງຕົກນະຮົກ

[໕໗໙] ຖ້າມີເຫດຂໍນິມົນທ່ານບອກຂ້ານ້ອຍເທີ້ນ ພຣະຜູ້ເປັນເຈົ້າຜູ້ຈະເລີນ
ຂ້ານ້ອຍກຳລັງຖ້າຟັງຄຳມີເຫດທີ່ໜ້າເຊື່ອຖືຢູ່
(ກັບປີຕະກະພິກຂຸຖວາຍພຣະພອນວ່າ)
ຍ້ອນຍັງບໍ່ໄດ້ສະເຫວີຍ
ຜົນກຳເຫຼົ່ານັ້ນຈະບໍ່ມີການສູນຫາຍ
ພາວະທີ່ກຳເຫຼົ່ານັ້ນຈະສູນສິ້ນໄປຈະເພິ່ງມີໄດ້ໃນໂລກນີ້

[໕໙໐] ຖ້າເຂົາປະພຶດທຳສະໝ່ຳສະເໝີໂດຍເຄົາລົບ
ບໍ່ຜະໝາດທັງຄືນທັງວັນ
ເຂົາຈະເພິ່ງພົ້ນຈາກນະຮົກນັ້ນໄປໄດ້
ແລະກຳທີ່ເວັ້ນການໃຫ້ຜົນ ເພິ່ງມີໄດ້

(ພຣະຣາຊາຕັດວ່າ)

[໕໙໑] ພຣະຜູ້ເປັນເຈົ້າຜູ້ຈະເລີນ ຂ້ານ້ອຍຮູ້ປະໂຫຍດຂອງບຸຣຸດນີ້ຢ່າງທົ່ວເຖິງ
ບັດນີ້ ຂໍພຣະຜູ້ເປັນເຈົ້າຈົ່ງອະນຸເຄາະຂ້ານ້ອຍແດ່
ຂໍໄດ້ກ່າວຕັກເຕືອນພ່ຳສອນຂ້ານ້ອຍ
ໂດຍວິທີທີ່ຂ້ານ້ອຍບໍ່ເພິ່ງຕົກນະຮົກດ້ວຍເທີ້ນ
ທ່ານຜູ້ມີປັນຍາກວ້າງຂວາງ

(ກັບປີຕະກະພິກຂຸຖວາຍພຣະພອນວ່າ)

[໕໙໘] ມື້ນີ້ ຂໍມະຫາບໍພິດຈົ່ງມີພຣະຫະໄທເຫຼື້ອມໃສ
ເຖິງພຣະພຸດທະເຈົ້າ ພຣະທຳ ແລະພຣະສົງວ່າເປັນບ່ອນເພິ່ງບ່ອນຣະນຶກເຖິງ
ອັນໜຶ່ງ ຈົ່ງຊົງສຶກສາສະມາທານສິກຂາບົດ ໕ ປະການ
ບໍ່ໃຫ້ຂາດແລະບໍ່ໃຫ້ບົກຜ່ອງ ຄື

[໕໙໓] ຈົ່ງຊົງງົດເວັ້ນຈາກການຂ້າສັດໂດຍທັນທີ
ເວັ້ນຂາດຈາກການຖືເອົາສິ່ງຂອງທີ່ເຈົ້າຂອງບໍ່ໄດ້ໃຫ້ໃນໂລກ
ບໍ່ຊົງສະເຫວີຍນ້ຳຈັນ ບໍ່ຕັດຄຳຕົວະ
ແລະຊົງຍິນດີສະເພາະພຣະມະເຫສີຂອງພຣະອົງ
ອັນໜຶ່ງ ຂໍຈົ່ງຊົງສະມາທານອຸໂປສົດສິນປະກອບດ້ວຍອົງ ໘
ຢ່າງປະເສີດນີ້ ເຊິ່ງເປັນກຸສົນ ມີສຸກເປັນກຳໄລ

[໕໙໔] ຂໍພຣະອົງຈົ່ງຊົງຖວາຍຈີວອນ ບິນທະບາດ
ຄິລານະປັດໄຈ ບ່ອນນອນ ບ່ອນນັ່ງ ເຂົ້າ ນ້ຳ ຂອງກິນ ຂອງຫຍ້ຳ
ຜ້າ ແລະບ່ອນຢູ່ອາໄສ ໃນທ່ານຜູ້ປະຕິບັດຊື່ທັງຫຼາຍ
ບຸນຍ່ອມຈະເລີນທຸກເມື່ອ

[໕໙໕] ຊົງອັງຄາດພິກຂຸທັງຫຼາຍຜູ້ສົມບູນດ້ວຍສິນ ປາສະຈາກຣາຄະ
ເປັນພະຫູສູດ ໃຫ້ອີ່ມໜຳດ້ວຍເຂົ້າແລະນ້ຳ ບຸນຈຶ່ງຈະເລີນທຸກເມື່ອ

[໕໙໖] ຜູ້ທີ່ປະພຶດທຳສະໝ່ຳສະເໝີໂດຍເຄົາລົບ
ບໍ່ຜະໝາດທັງຄືນທັງວັນແນວນີ້ ເພິ່ງພົ້ນຈາກນະຮົກນັ້ນ
ແລະກຳທີ່ເວັ້ນການໃຫ້ຜົນເພິ່ງມີໄດ້
(ພຣະຣາຊາຕັດວ່າ)

[໕໙໗] ມື້ນີ້ແລ ຂ້ານ້ອຍມີຈິດເຫຼື້ອມໃສ ຂໍເຖິງພຣະພຸດທະເຈົ້າ
ພຣະທຳ ແລະພຣະສົງວ່າເປັນບ່ອນເພິ່ງບ່ອນຣະນຶກ
ອັນໜຶ່ງ ຂໍສຶກສາສະມາທານສິກຂາບົດ ໕ ປະການ
ບໍ່ໃຫ້ຂາດແລະບໍ່ໃຫ້ບົກຜ່ອງ ຄື

[໕໙໘] ຂໍງົດເວັ້ນຈາກການຂ້າສັດທັນທີ
ເວັ້ນຂາດຈາກການຖືເອົາສິ່ງທີ່ເຈົ້າຂອງບໍ່ໄດ້ໃຫ້ໃນໂລກ
ບໍ່ດື່ມນ້ຳເມົາ ບໍ່ກ່າວຕົວະ
ແລະຍິນດີສະເພາະພັນລະຍາຂອງຕົນ
ອັນໜຶ່ງ ຂໍສະມາທານອຸໂປສົດສິນປະກອບດ້ວຍອົງ ໘
ຢ່າງປະເສີດນີ້ ເຊິ່ງເປັນກຸສົນ ມີສຸກເປັນກຳໄລ

[໕໙໙] ຂ້ານ້ອຍຈະຖວາຍຈີວອນ ບິນທະບາດ ຄິລານະປັດໄຈ ບ່ອນນອນ ບ່ອນນັ່ງ
ເຂົ້າ ນ້ຳ ຂອງກິນຂອງຫຍ້ຳ ຜ້າ ແລະບ່ອນຢູ່ອາໄສ

[໖໐໐] ຂ້ານ້ອຍຍິນດີໃນພຣະພຸດທະສາດສະໜາ ບໍ່ຫວັ່ນໄຫວ
ຈະຖວາຍແກ່ພິກຂຸທັງຫຼາຍຜູ້ສົມບູນດ້ວຍສິນ
ປາສະຈາກຣາຄະ ເປັນພະຫູສູດ

[໖໐໑] ເຈົ້າອຳພະສັກຂະຣະລິດສະຫວີຊົງເປັນອຸປາສິກຄົນໜຶ່ງໃນເມືອງໄພສາລີ
ຊົງມີສັດທາ ແລະມີພຣະຫະໄທອ່ອນໂຍນເຊັ່ນນັ້ນ
ຊົງທຳອຸປະກາຣະ ບຳລຸງພຣະພິກຂຸສົງໂດຍເຄົາລົບໃນການນັ້ນ

[໖໐໔] ບຸຣຸດຜູ້ຖືກຫຼາວສຽບ ດີພະຍາດ
ມີອິດສະຫຼະ ສະບາຍດີ ໄດ້ບັນພະຊາແລ້ວ
ແມ່ນຄົນທັງສອງອາໄສກັບປິຕະກະພິກຂຸຜູ້ປະເສີດ ໄດ້ບັນລຸສາມັນຍະຜົນ[๑]

[໖໐໕] ການຄົບສັດຕະບຸຣຸດແນວນີ້ຍ່ອມມີຜົນຫຼາຍແກ່ສັດຕະບຸຣຸດທັງຫຼາຍຜູ້ຮູ້ແຈ້ງຢູ່
ບຸຣຸດຜູ້ຖືກຫຼາວສຽບໄດ້ບັນລຸອະຣະຫັດຕະຜົນ
ສ່ວນເຈົ້າອຳພະສັກຂະຣະລິດສະຫວີໄດ້ບັນລຸໂສຕາປັດຕິຜົນ

**ອຳພະສັກຂະຣະເປຕະວັດຖຸທີ ໑ ຈົບ**

# ໔. ເສຣີສະກະເປຕະວັດຖຸ

## ເລື້ອງເສຣີສະກະເຜດ

(ພຣະຄະອຳປະຕິກ່າວວ່າ)

[໖໐໔] ທ່ານທັງຫຼາຍຈົ່ງຟັງຄຳຂອງເທວະດາແລະພວກພໍ່ຄ້າ
ທີ່ໄດ້ມາພົບກັນໃນທາງທະເລຊາຍໃນເວລານັ້ນ
ແລະຂໍເຊີນທຸກທ່ານຟັງຄຳເວົ້າຕາມທີ່ເທວະດາ
ແລະພວກພໍ່ຄ້າກ່າວສົນທະນາກັນ

[໖໐໕] ຍັງມີພຣະຣາຊາຜູ້ຊົງຍົດພຣະນາມວ່າ ປາຍາສີ
ໄດ້ເກີດຮ່ວມກັບໝູ່ພຸ່ມເທວະດາ
ມີບໍລິວານຍົດບັນເທີງຢູ່ໃນວິມານຂອງຕົນ
ເປັນເທວະດາແຕ່ໄດ້ມາສົນທະນາກັບພວກມະນຸດ

(ເສຣີສະກະເທບພະບຸດຖາມພວກພໍ່ຄ້າດ້ວຍຄາຖາວ່າ)

[໖໐໖] ມະນຸດທັງຫຼາຍຜູ້ຢ້ານທາງຄົດຄ້ຽວ
ມີໃຈຫວາດຫວັ່ນຢູ່ໃນບ່ອນໜ້າຣະແວງວ່າມີໄພ ໃນປ່າ ໃນຖິ່ນຂອງອະມະນຸດ
ໃນທາງກັນດານ ເຊິ່ງມີນ້ຳມີອາຫານບໍ່ພຽງພໍ
ຍ່າງໄປໄດ້ແສນຍາກ ທ່າມກາງທະເລຊາຍ

[໖໐໗] ໃນທາງທະເລຊາຍນີ້ ບໍ່ມີໝາກໄມ້ ບໍ່ມີເຜືອກມັນ ບໍ່ມີເຊື້ອໄຟ
ໃນທາງທະເລຊາຍນີ້ ຈັກຫາອາຫານໄດ້ແຕ່ບ່ອນໃດ

ນອກຈາກຝຸ່ນແລະຊາຍທີ່ແດດແຜດເຜົາທັງຮ້ອນ ທັງທາລຸນ

[ຜ໐໗] ທີ່ນີ້ເປັນບ່ອນໂນນ ຮ້ອນດັ່ງແຜ່ນເຫຼັກເຜົາໄຟ
ຫາຄວາມສະບາຍບໍ່ໄດ້ ທຽບທໍ່ນະຮົກ
ສະຖານທີ່ນີ້ເປັນບ່ອນຢູ່ດັ້ງເດີມຂອງພວກຫຍາບຊ້າມີຜີສາດເປັນຕົ້ນ
ເປັນພູມປະເທດຄືຖືກສາບໄວ້

[ຜ໐໘] ອັນໜຶ່ງ ພວກທ່ານຫວັງອັນໃດ
ຍ້ອນເຫດໃດຈຶ່ງບໍ່ພິຈາລະນາໃຫ້ຖີ່ຖ້ວນ
ນໍາກັນເຂົ້າມາຍັງປະເທດຖິ່ນນີ້ພ້ອມກັນ
ຍ້ອນຄວາມໂລບ ຄວາມຢ້ານ ຫຼືຍ້ອນຄວາມຫຼົງ

(ພວກພໍ່ຄ້າຕອບວ່າ)

[ຜ໑໐] ພວກຂ້ານ້ອຍນັ້ນເປັນພໍ່ຄ້າກວຽນຢູ່ໃນແຄວ້ນມະຄົດແລະແຄວ້ນອັງຄະ
ຕ້ອງການຊັບ ຫວັງກໍາໄລ
ຈຶ່ງບັນທຸກສິນຄ້າມາຫຼາຍ
ພາກັນໄປສູ່ສິນທຸປະເທດແລະໂສວີຣະປະເທດ

[ຜ໑໑] ກາງເວັນ ພວກຂ້ານ້ອຍທຸກຄົນທົນຄວາມຫິວນໍ້າບໍ່ໄດ້
ທັງມຸ້ງຫວັງຈະອະນຸເຄາະສັດພາຫະນະ
ຈຶ່ງຟ້າວເດີນທາງມາໃນເວລາກາງຄືນ ເຊິ່ງເປັນເວລາວິການ

[ຜ໑໒] ພວກຂ້ານ້ອຍໄປຜິດທາງ ຈຶ່ງຫຼົງທາງ
ສັບສົນຄືຄົນຕາບອດ
ຍ່າງຫຼົງເຂົ້າໄປໃນປ່າທີ່ໄປໄດ້ຍາກແສນຍາກ
ທ່າມກາງທະເລຊາຍ ເກີດງຸນງົງສົງໄສ ບໍ່ຮູ້ທິດທາງ

[ຜ໑໓] ທ່ານທີ່ຄວນບູຊາ ພວກຂ້ານ້ອຍໄດ້ພົບວິມານອັນປະເສີດ
ແລະໂຕທ່ານເຊິ່ງບໍ່ເຄີຍພົບເຫັນມາກ່ອນນີ້
ຈຶ່ງຫວັງຈະລອດຊີວິດຍິ່ງກວ່າແຕ່ກ່ອນ
ຍ້ອນໄດ້ເຫັນ ຈຶ່ງພາກັນແຈ່ມໃສ ດີໃຈແລະເບີກບານໃຈ

(ເທບພະບຸດຖາມວ່າ)

[ຜ໑໔] ຍ້ອນໂພຄະຊັບເປັນຕົ້ນເຫດ
ພວກທ່ານຈຶ່ງພາກັນໄປສູ່ທິດທາງຕ່າງ ໆ
ຄື ຝັ່ງສະມຸດທະເລຊາຍທາງທີ່ຕ້ອງໃຊ້ເຄື່ອງຫວາຍ
ທາງທີ່ຕ້ອງຕອກຫອຍ[1] ທາງທີ່ມີແມ່ນ້ຳ
ແລະທາງພູທີ່ໄປໄດ້ຍາກ

[ຜ໑໕] ພໍ່ຄ້າທັງຫຼາຍ ພວກທ່ານໄດ້ໄປສູ່ແຄວ້ນຂອງພຣະຣາຊາອື່ນ ໆ
ພົບເຫັນຜູ້ຄົນຊາວຕ່າງປະເທດ
ພວກເຮົາຂໍຟັງສິ່ງອັດສະຈັນ
ທີ່ພວກທ່ານໄດ້ຍິນ ຫຼືໄດ້ເຫັນມາ

(ພວກພໍ່ຄ້າຕອບວ່າ)

[ຜ໑໖] ທ່ານກຸມານ ສົມບັດຂອງມະນຸດທີ່ຜ່ານມາທັງໝົດ
ເຊິ່ງອັດສະຈັນກວ່າວິມານຂອງທ່ານແມ່ນນີ້
ພວກຂ້ານ້ອຍບໍ່ເຄີຍໄດ້ເຫັນຫຼືໄດ້ຍິນ
ວິມານຂອງທ່ານເຊິ່ງມີຣັດສະໝີບໍ່ຊົ່ວ
ພວກຂ້ານ້ອຍແລເບິ່ງແລ້ວບໍ່ອິ່ມເລີຍ

[ຜ໑໗] ທີ່ວິມານຂອງທ່ານມີສະໂບກຂະຣະນີ ລອຍຢູ່ໃນອາກາດ
ມີສວນດອກໄມ້ຫຼວງຫຼາຍ ມີບົວຂາວຫຼາຍ
ມີໝູ່ໄມ້ແຕກດອກອອກຜົນຢູ່ປະຈຳ
ໂຮຍກິ່ນຫອມກະຈາຍອົບອວນ

[ຜ໑໘] ເສົາວິມານເຫຼົ່ານີ້ເປັນເສົາແກ້ວໄພທູນ ສູງຮ້ອຍສອກ
ປະດັບດ້ວຍແກ້ວຜຶກ ແກ້ວປະພານ ແກ້ວລາຍ ແລະທັບທິມ
ມີຣັດສະໝີສະຫວ່າງສະໄຫວ

[ຜ໑໙] ວິມານຂອງທ່ານນີ້ມີເສົາ ໑,໐໐໐ ຕົ້ນ
ພາຍໃນປະກອບດ້ວຍແກ້ວ
ພາຍນອກອ້ອມຮອບດ້ວຍໄພທີຄຳ[2]
ແລະມຸງບັງຢ່າງດີດ້ວຍແຜ່ນຄຳ
ມີອານຸພາບຫາບ່ອນປຽບບໍ່ໄດ້
ງາມຢູ່ເທິງເສົາເຫຼົ່ານັ້ນ

[໒໘໐] ວິມານຂອງທ່ານນີ້ສະຫວ່າງສະໄຫວດ້ວຍຄຳຊົມພູນຸດຊັ້ນເລີດ
ທຸກສ່ວນຂອງວິມານກໍ່ງາມເກົາດີ
ປະກອບດ້ວຍຂັ້ນໄດແລະພື້ນໜ້າພໍໃຈ ໝັ້ນຄົງ
ງົດງາມ ມີສ່ວນປະກອບກົມກືນ
ຊວນພິດຢ່າງຍິ່ງ ໜ້າພໍໃຈ

[໒໘໑] ພາຍໃນວິມານແກ້ວ ມີເຂົ້ານ້ຳອຸດົມສົມບູນ
ໂຕທ່ານມີໝູ່ເທບອັບປະສອນຫ້ອມລ້ອມ
ກຶກກ້ອງດ້ວຍສຽງກອງຕະໂພນ ເປີງມາງແລະດຸຣິຍາງ
ເປັນຜູ້ທີ່ທວຍເທບນອບນ້ອມແລ້ວດ້ວຍການຊົມເຊີຍແລະຂາບໄຫວ້

[໒໘໒] ໂຕທ່ານນັ້ນມີອານຸພາບສຸດທີ່ຈະຄິດ
ປະກອບດ້ວຍຄຸນທຸກຢ່າງ
ຜູ້ອັນໝູ່ເທບນາຣີປຸກເຣົ້າ
ບັນເທີງຢູ່ໃນວິມານຜາສາດທີ່ປະເສີດ ໜ້າອອນຊອນໃຈ
ຄືທ້າວເວດສະວັນບັນເທີງຢູ່ໃນນະລິນີສະຖານ[໑]

[໒໘໓] ທ່ານເປັນເທວະດາຫຼືເປັນຍັກ
ເປັນທ້າວສັກກະຈອມເທບ ຫຼືເປັນມະນຸດ
ພວກພໍ່ຄ້າກວຽນຖາມທ່ານ
ໂຜດບອກດ້ວຍເທີ້ນ ທ່ານເປັນເທວະດາຊື່ອັນໃດ

(ເທບພະບຸດຕອບວ່າ)

[໒໘໔] ຂ້າພະເຈົ້າເປັນເທວະດາຊື່ເສຣີສະກະ ເປັນຜູ້ຮັກສາທາງກັນດານ
ຄຸ້ມຄອງທາງທະເລຊາຍ ເຮັດຕາມຄຳສັ່ງທ້າວເວດສະວັນ
ຈຶ່ງດູແລຮັກສາປະເທດຖິ່ນນີ້ຢູ່

(ພວກພໍ່ຄ້າຖາມວ່າ)

[໒໘໕] ວິມານນີ້ທ່ານໄດ້ຕາມຄວາມປາຖະໜາ
ຫຼືເກີດໂດຍຄວາມປ່ຽນແປງ
ທ່ານເຮັດເອງຫຼືເທວະດາທັງຫຼາຍມອບໃຫ້
ພວກພໍ່ຄ້າກວຽນຖາມທ່ານວ່າ
ວິມານທີ່ໜ້າພໍໃຈນີ້ທ່ານໄດ້ມາແນວໃດ

(ເທບພະບຸດຕອບວ່າ)

[໓໔໖] ວິມານນີ້ບໍ່ແມ່ນຂ້າພະເຈົ້າໄດ້ຕາມຄວາມປາຖະໜາ
ບໍ່ແມ່ນເກີດໂດຍການປຸ່ງນແປງ
ບໍ່ແມ່ນຂ້ານ້ອຍເຮັດເອງທັງບໍ່ແມ່ນເທວະດາທັງຫຼາຍມອບໃຫ້
ວິມານທີ່ໜ້າພໍໃຈນີ້ຂ້າພະເຈົ້າໄດ້ມາດ້ວຍບຸນກຳອັນດີງາມຂອງຕົນ

(ພວກພໍ່ຄ້າຖາມວ່າ)

[໓໔໗] ອັນໃດເປັນຂໍ້ປະຕິບັດແລະເປັນພິມມະຈັນຂອງທ່ານ
ນີ້ເປັນວິບາກແຫ່ງບຸນກຳອັນໃດທີ່ທ່ານສັ່ງສົມໄວ້ດີແລ້ວ
ພວກພໍ່ຄ້າກວງນຖາມທ່ານວ່າ
ວິມານນີ້ທ່ານໄດ້ມາແນວໃດ

(ເທບພະບຸດຕອບວ່າ)

[໓໔໘] ຂ້າພະເຈົ້າໄດ້ມີນາມວ່າປາຍາສິ
ເມື່ອຄັ້ງຂ້າພະເຈົ້າຄອງຣາດຊະສົມບັດແຄວ້ນໂກສົນ
ຂ້າພະເຈົ້າເປັນນັດຖິກະທິດຖິ໌
ເປັນຄົນຂີ້ຖີ່ ມີທຳຊົ່ວຊາມ
ແລະມີປົກກະຕິກ່າວວ່າຂາດສູນ ໒

[໓໔໙] ໄດ້ມີສະມະນະ ຜູ້ພະຫູສູດ ນາມວ່າກຸມານກັດສະປະ
ເຊິ່ງເລີດທາງກ່າວທຳໄດ້ຢ່າງວິຈິດມ່ວນ
ຄັ້ງນັ້ນທ່ານໄດ້ກ່າວທຳມະກະຖາໂຜດຂ້າພະເຈົ້າ
ໄດ້ຊ່ວຍບັນເທົາທິດຖິທີ່ເປັນຂ້າເສິກທາງໃຈຂອງຂ້າພະເຈົ້າໄດ້

[໓໕໐] ຂ້າພະເຈົ້າທຳມະກະຖາຂອງທ່ານແລ້ວ
ໄດ້ປະກາດຕົນເປັນອຸປາສົກ
ງົດເວັ້ນຈາກການຂ້າສັດ
ເວັ້ນຂາດຈາກການລັກຊັບໃນໂລກ
ຍິນດີສະເພາະພັນລະຍາຂອງຕົນ
ບໍ່ກ່າວຕົວະ ບໍ່ດື່ມນ້ຳເມົາ

[໓໕໑] ຂໍ້ນັ້ນເປັນຂໍ້ປະຕິບັດແລະເປັນພິມມະຈັນຂອງຂ້າພະເຈົ້າ

ນີ້ເປັນວິບາກແຫ່ງບຸນກຳນັ້ນທີ່ຂ້າພະເຈົ້າສັ່ງສົມໄວ້ດີແລ້ວ
ວິມານນີ້ຂ້າພະເຈົ້າໄດ້ມາດ້ວຍບຸນກຳອັນດີງາມນັ້ນນັ້ນເອງ

(ພວກພໍ່ຄ້າຖາມວ່າ)

[໖໑໘] ຮູ້ມາວ່າ ຄົນມີປັນຍາທັງຫຼາຍເວົ້າແຕ່ຄຳຈິງ
ຄຳເວົ້າຂອງບັນດິດທັງຫຼາຍຈຶ່ງບໍ່ກັບກາຍເປັນແນວອື່ນ
ຄົນເຮັດບຸນໄວ້ຈະໄປບ່ອນໃດ ຍ່ອມມີແຕ່ສິ່ງທີ່ໜ້າຮັກໜ້າຕ້ອງການ
ບັນເທີງຢູ່ໃນບ່ອນນັ້ນ

[໖໑໑] ຢູ່ບ່ອນໃດ ມີຄວາມໂສກ ຄວາມຮ້ອງໄຫ້
ການຂ້າ ການຄຸມຂັງ ແລະເຫດເກີດເລື້ອງຊົ່ວຮ້າຍ
ຄົນເຮັດບາບໄວ້ກໍຈະໄປໃນບ່ອນນັ້ນ
ບໍ່ພົ້ນຈາກຄະຕິທີ່ຊົ່ວໄປໄດ້ບໍ່ວ່າໃນການໃດ

[໖໑໘] ທ່ານກຸມານ ຍ້ອນເຫດອັນໃດນໍ
ເທບບໍລິວານຈຶ່ງເປັນຄືຜູ້ຟັ່ນເຟືອນໄປໃນບໍ່ດົນນີ້
ຄືນ້ຳໃສຖືກກວນໃຫ້ຂຸ່ນ
ຍ້ອນເຫດໃດນໍ
ເທບບໍລິວານນີ້ແລະໂຕທ່ານຈຶ່ງໄດ້ມີຄວາມໂທມະນັດ

(ເທບພະບຸດຕອບວ່າ)

[໖໑໕] ທ່ານທັງຫຼາຍ ກິ່ນທິບເຫຼົ່ານີ້
ໂຊຍກິ່ນຫອມຫວນຈາກປ່າໄມ້ສົ້ມກົບ
ຫອມກະຈາຍອົບອວນທົ່ວວິມານນີ້
ກຳຈັດຄວາມມືດໄດ້ທັງກາງເວັນແລະກາງຄືນ

[໖໑໖] ລ່ວງໄປ ໑໐໐ ປີ ເປືອກຝັກໄມ້ສົ້ມກົບເຫຼົ່ານີ້
ແຕ່ລະຝັກກໍຈະແຕກອອກ
ເປັນທີ່ຮູ້ກັນວ່າ ໑໐໐ ປີຂອງມະນຸດລ່ວງໄປແລ້ວ
ຕັ້ງແຕ່ຂ້າພະເຈົ້າເກີດໃນໝູ່ເທວະດານີ້

[໖໑໗] ທ່ານທັງຫຼາຍ ຂ້າພະເຈົ້າຮູ້ເຫັນແລ້ວວ່າ
ຂ້າພະເຈົ້າຈັກດຳລົງຢູ່ໃນວິມານນີ້ອີກ ໕໐໐ ປີທິບ

ແລ້ວຈຶ່ງຈຸຕິ ຍ້ອນສິ້ນບຸນ ສິ້ນອາຍຸ
ຂ້າພະເຈົ້າຈຶ່ງຈຸກເຈົ່າ ຍ້ອນຄວາມໂສກນັ້ນນັ້ນເອງ

(ພວກພໍ່ຄ້າກ່າວວ່າ)

[໒໓໗] ຜູ້ທີ່ໄດ້ວິມານເຊິ່ງຫາທີ່ປຽບບໍ່ໄດ້ເປັນເວລາດົນເຊັ່ນນັ້ນ
ຈະເພິ່ງເສົ້າໂສກໄປເຮັດຫຍັງນໍ
ແຕ່ພວກຜູ້ມີບຸນໜ້ອຍເຂົ້າຢູ່ວິມານຊົ່ວເວລາສັ້ນນັ້ນແລ
ຄວນເສົ້າໂສກແທ້

(ເທບພະບຸດກ່າວວ່າ)

[໒໓໙] ທ່ານທັງຫຼາຍ ຂໍ້ທີ່ທ່ານທັງຫຼາຍກ່າວວາຈາທີ່ໜ້າຮັກກັບຂ້າພະເຈົ້າ
ນັ້ນເປັນການກ່າວຕັກເຕືອນອັນສົມຄວນແກ່ຂ້າພະເຈົ້າ
ສ່ວນຂ້າພະເຈົ້າຈະນຳຄຸ້ມຄອງທ່ານທັງຫຼາຍ
ເຊີນທ່ານທັງຫຼາຍໄປສູ່ທີ່
ທີ່ທ່ານທັງຫຼາຍປາຖະໜາໂດຍຄວາມໂດຍປອດໄພເທີ້ນ

(ພວກພໍ່ຄ້າກ່າວວ່າ)

[໒໔໐] ພວກຂ້ານ້ອຍຕ້ອງການຊັບ ຫວັງກຳໄລ
ຈຶ່ງພາກັນໄປສູ່ສິນທຸປະເທດ ແລະໂສວີຣະປະເທດ
ແລ້ວຈັກປະກອບກຳທີ່ໄດ້ຮັບຮອງໄວ້ຕາມສົມຄວນ
ມີການເສຍສະລະຢ່າງບໍຣິບູນ
ກະທຳການບູຊາເສຣີສະກະເທບພະບຸດຢ່າງມະໂຫລານ

(ເທບພະບຸດກ່າວວ່າ)

[໒໔໑] ທ່ານທັງຫຼາຍ ຢ່າໄດ້ທຳການບູຊາເສຣີສະກະເທບພະບຸດເລີຍ
ສິ່ງທີ່ທ່ານທັງຫຼາຍເວົ້າເຖິງທັງໝົດ ຈັກມີແກ່ພວກທ່ານ
ທ່ານທັງຫຼາຍຈົ່ງງົດເວັ້ນກຳຊົ່ວແລະຈົ່ງຕັ້ງໃຈປະກອບຕາມທຳ
[໒໔໒] ໃນໝູ່ພໍ່ຄ້າກວຽນນີ້ ມີອຸປາສົກຜູ້ເປັນພະຫູສູດ
ມີສິນແລະຂໍ້ວັດປະຕິບັດ ມີສັດທາ ມີຈາຄະ
ມີສິນເປັນທີ່ຮັກຢ່າງຍິ່ງ
ມີວິຈາຣະນະຍານ ສັນໂດດ ມີຄວາມຮູ້

[໖໘໓] ບໍ່ເວົ້າຕົວະທັງທີ່ຮູ້ຢູ່
ບໍ່ຄິດບຽດບຽນຜູ້ອື່ນ
ບໍ່ເວົ້າສັບສໍ່ໃຫ້ເຂົາແຕກກັນ
ເວົ້າແຕ່ວາຈາອ່ອນຫວານລະມຸນລະໄມ

[໖໘໔] ເຂົາມີຄວາມເຄົາລົບ ຢຳເກງ ມີວິໄນ
ບໍ່ເປັນຄົນຊົ່ວ ເປັນຜູ້ບໍລິສຸດໃນອະທິສີນ
ມີຄວາມປະພຶດປະເສີດ
ລ້ຽງມານດາບິດາໂດຍຖືກຕ້ອງຕາມທຳ

[໖໘໕] ເຂົາເຫັນຈະສະແຫວງຫາໂພຄະຊັບ ຍ້ອນເຫດແຫ່ງມານດາບິດາ
ບໍ່ແມ່ນຍ້ອນເຫດແຫ່ງຕົນ ເມື່ອມານດາບິດາລ່ວງລັບໄປ
ເຂົາກໍນ້ອມໄປໃນເນກຂຳມະ ປະພຶດພົມມະຈັນ

[໖໘໖] ເຂົາເປັນຄົນຊື່ສັດ ບໍ່ຄົດໂກງ
ບໍ່ໂອ້ອວດ ບໍ່ຂີ້ສໍ້ ບໍ່ເວົ້າມີເລດໄນ
ເຂົາເຮັດແຕ່ກຳດີ
ຕັ້ງຢູ່ໃນທຳແນວນີ້ ຈະເພິ່ງໄດ້ຮັບທຸກແນວໃດນໍ
[໖໘໗] ຍ້ອນອຸປາສິການັ້ນເປັນເຫດ ຂ້າພະເຈົ້າຈຶ່ງໄດ້ຜາກົດໂຕ
ພໍ່ຄ້າທັງຫຼາຍ ຍ້ອນແນວນັ້ນ ທ່ານທັງຫຼາຍຈຶ່ງເຫັນທຳເທີ້ນ
ຍ້ອນເວັ້ນອຸປາສິການັ້ນສາແລ້ວ
ທ່ານທັງຫຼາຍຈະສັບສົນ
ຄືຄົນຕາບອດຫຼົງເຂົ້າໄປໃນປ່າເປັນເຖົ້າຖ່ານໄປ
ການປະຖິ້ມຜູ້ອື່ນເປັນການງ່າຍສຳລັບຄົນທົ່ວໄປ
(ແຕ່ເປັນການຍາກສຳລັບສັດຕະບຸຣຸດ)
ການຄົບຫາສັດຕະບຸຣຸດຈຶ່ງນຳຄວາມສຸກມາໃຫ້ຢ່າງແທ້ຈິງ

(ພວກພໍ່ຄ້າຖາມວ່າ)

[໖໘໘] ອຸປາສິກາຄົນນັ້ນຄືໃຜ ແລະເຮັດວຽກອັນໃດ
ເຂົາຊື່ອັນໃດ ແລະໂຄດອັນໃດ
ຂ້າແດ່ເທວະດາ ແມ່ນຂ້ານ້ອຍທັງຫຼາຍ
ກໍຕ້ອງການຈະເຫັນອຸປາສິການັ້ນທີ່ທ່ານມາບ່ອນນີ້
ເພື່ອຊ່ວຍເຫຼືອອຸປາສິກາທີ່ທ່ານມັກ ເປັນຄົນໂຊກດີ

(ເທບພະບຸດຕອບວ່າ)

[໓໔໙] ຜູ້ທີ່ເປັນຊ່າງຕັດຜົມມີຊື່ວ່າສຳພະວະ
ອາໄສການຕັດຜົມລ້ຽງຊີບ
ເປັນຄົນຮັບໃຊ້ຂອງພວກທ່ານ
ທ່ານທັງຫຼາຍຈົ່ງຮູ້ວ່າເປັນອຸປາສົກ
ທ່ານທັງຫຼາຍຢ່າດູໝິ່ນເຂົາ
ເຂົາເປັນຜູ້ມີສິນເປັນທີ່ຮັກຍິ່ງ

(ພວກພໍ່ຄ້າກ່າວວ່າ)

[໓໕໐] ຂ້າແດ່ເທວະດາ ພວກຂ້ານ້ອຍຮູ້ຈັກຊ່າງຕັດຜົມຄົນທີ່ທ່ານເວົ້າເຖິງດີ
ແຕ່ບໍ່ຮູ້ຈັກວ່າ ເຂົາເປັນຄົນແນວນີ້ເລີຍ
ແມ່ນຂ້ານ້ອຍທັງຫຼາຍຟັງຄຳຂອງທ່ານແລ້ວ
ກໍຈັກບູຊາອຸປາສົກນັ້ນຢ່າງມະໂຫລານ

(ເທບພະບຸດກ່າວວ່າ)

[໓໕໑] ພວກຜູ້ຄົນໃນກອງກວຽນນີ້
ບໍ່ວ່າຄົນໜຸ່ມ ຄົນແກ່ ຫຼືຄົນປູນກາງ
ທັງໝົດທຸກຄົນນັ້ນ ເຊີນຂຶ້ນໄປເທິງວິມານ
ພວກຄົນຂີ້ຖີ່ຈົ່ງເບິ່ງຜົນຂອງບຸນທັງຫຼາຍ

(ພຣະທຳສັງຄີຕິກາຈານກ່າວ ໓ ຄາຖາໃນຕອນຈົບເລື້ອງວ່າ)

[໓໕໔] ພໍ່ຄ້າທຸກຄົນ ໃນບ່ອນນັ້ນ
ຕ່າງຄົນຕ່າງເຂົ້າຫ້ອມລ້ອມຊ່າງຕັດຜົມນັ້ນ
ພາກັນຂຶ້ນວິມານເຊິ່ງເໝືອນພົບຕາວະຕິງສາຂອງທ້າວວາສະວະ
ພ້ອມກ່າວວ່າ ເຮົາກ່ອນ ໆ

[໓໕໓] ພໍ່ຄ້າທຸກຄົນນັ້ນຕ່າງປະກາດຄວາມເປັນອຸປາສົກ ໃນບ່ອນນັ້ນວ່າ
ເຮົາກ່ອນ ໆ ແລ້ວໄດ້ເປັນຜູ້ງົດເວັ້ນຈາກການຂ້າສັດ
ເວັ້ນຂາດຈາກການລັກຊັບໃນໂລກ
ຍິນດີສະເພາະພັນລະຍາຂອງຕົນ
ບໍ່ກ່າວຕົວະ ບໍ່ດື່ມນ້ຳເມົາ

[໖໕໔] ພໍ່ຄ້າທຸກຄົນ ເມື່ອຕ່າງຄົນຕ່າງປະກາດຄວາມເປັນອຸປາສົກ
ໃນບ່ອນນັ້ນແລ້ວໄດ້ໄປສູ່ສະຖານທີ່ທີ່ຕົນປາຖະໜາໂດຍປອດໄພ
ໝູ່ພໍ່ຄ້າກວຽນບັນເທີງຢູ່ດ້ວຍເທວະລິດເນືອງ ໆ
ໄດ້ຮັບອະນຸຍາດແລ້ວຫຼີກໄປ

[໖໕໕] ພໍ່ຄ້າເຫຼົ່ານັ້ນຕ້ອງການຊັບ ຫວັງກຳໄລ
ໄປເຖິງສິນທຸແລະໂສວີຣະປະເທດ ພະຍາຍາມຄ້າຂາຍຕາມປາຖະໜາ
ມີລາບບໍລິບູນ ກັບມາເມືອງປາຕະລີບຸດໂດຍປອດໄພ

[໖໕໖] ພໍ່ຄ້າເຫຼົ່ານັ້ນໄປເຮືອນຂອງຕົນ
ມີຄວາມປອດໄພ ພ້ອມໜ້າບຸດພັນລະຍາ
ມີຈິດເພີດເພີນ ດີໃຈ ຍິນດີ
ບູຊາເສຣີສະກະເທບພະບຸດຢ່າງມະໂຫລານ
ໄດ້ຊ່ອຍກັນສ້າງເທວາໄລຊື່ເສຣີສະກະຂຶ້ນ

[໖໕໗] ການຄົບສັດຕະບຸຣຸດໃຫ້ສຳເລັດປະໂຫຍດແບບນີ້
ການຄົບຜູ້ມີຄຸນນະທຳມີປະໂຫຍດຫຼາຍ
ພໍ່ຄ້າທັງໝົດໄດ້ປະສົບຄວາມສຸກ
ຍ້ອນຜົນອັນສືບເນື່ອງມາຈາກອຸປາສົກຄົນດຽວ

**ເສຣີສະກະເປຕະວັດຖຸທີ ໔ ຈົບ**

**ພານະວາຣະທີ ໑ ຈົບ**

# ໑. ນັນທະກະເປຕະວັດຖຸ[໑]

## ເລື້ອງນັນທະກະເຜດ

(ເພື່ອຈະສະແດງເນື້ອຄວາມນັ້ນ ພຣະສັງຄີຕິກາຈານທັງຫຼາຍຈຶ່ງກ່າວວ່າ)

[໖໕໘] ມີພຣະຣາຊາພຣະອົງໜຶ່ງຊົງພຣະນາມວ່າປິງຄະລະກະ
ເປັນໃຫຍ່ແຫ່ງຊາວສຸຣັດຖະວິໄສ ສະເດັດໄປເຝົ້າພຣະເຈົ້າໂມຣິຍະແລ້ວ
ກັບມາເຖິງທາງທີ່ຈະໄປສູ່ສຸຣັດຖະວິໄສອີກ

[໗໕໙] ສະເດັດມາເຖິງທາງໂຄ້ງ ໃນເວລາທ່ຽງວັນ ເຊິ່ງເປັນເວລາຮ້ອນ
ໄດ້ທອດພຣະເນດເຫັນທາງທີ່ໜ້າອອນຊອນ
ເປັນທາງຊາຍທີ່ເຜດເນຣະມິດໄວ້ນັ້ນ

[໗໖໐] ຈຶ່ງຕັດບອກນາຍສາຣະຖີວ່າ
ທາງນີ້ໜ້າອອນຊອນ ປອດໄພ ສະດວກ ປອດໂປ່ງ
ສາຣະຖີ ພວກເຮົາຊິໄປທາງນີ້ແລ
ຈາກບ່ອນນີ້ໄປບໍ່ໄກກໍຈະເຖິງສຸຣັດຖະປະເທດ

[໗໖໑] ພຣະເຈົ້າສຸຣັດຖະ ໄດ້ສະເດັດພຣະຣາດຊະດຳເນີນໄປທາງນັ້ນ
ພ້ອມດ້ວຍກອງທັບ ໔ ເຫຼົ່າ
ບຸຣຸດຄົນໜຶ່ງຕົກໃຈຢ້ານໄດ້ຂາບທູນພຣະເຈົ້າສຸຣັດຖະ ດັ່ງນີ້ວ່າ

[໗໖໒] ພວກເຮົາເດີນທາງຜິດສາແລ້ວ ເປັນທາງເປັນຕາຢ້ານ
ໜ້າຂົນຫົວລຸກ
ຍ້ອນທາງຜາກົດສະເພາະທາງໜ້າ ແຕ່ທາງຫຼັງບໍ່ຜາກົດ

[໗໖໓] ພວກເຮົາຍ່າງຜິດທາງສາແລ້ວ ເຫັນຈະມາໃກ້ພວກເຜດ
ກິ່ນອະມະນຸດຟຸ້ງມາ ຂ້າພຣະອົງໄດ້ຍິນສຽງພິລຶກເປັນຕາຢ້ານ

[໗໖໔] ພຣະເຈົ້າສຸຣັດຖະຊົງຕົກພຣະທະໄທ ຕັດກັບນາຍສາຣະຖີດັ່ງນີ້ວ່າ
ພວກເຮົາເດີນທາງຜິດສາແລ້ວ ເປັນທາງເປັນຕາຢ້ານໜ້າຂົນຫົວລຸກ
ທາງຜາກົດສະເພາະທາງໜ້າ ແຕ່ທາງຫຼັງບໍ່ຜາກົດ

[໗໖໕] ພວກເຮົາຍ່າງຜິດທາງສາແລ້ວ ເຫັນຈະມາໃກ້ພວກເຜດ
ກິ່ນອະມະນຸດຟຸ້ງມາ ເຮົາໄດ້ຍິນສຽງພິລຶກເປັນຕາຢ້ານ

[໗໖໖] ຈຶ່ງສະເດັດຂຶ້ນຄໍຊ້າງ ທອດພຣະເນດໄປທົ່ວທັງ ໔ ທິດ
ຊົງເຫັນຕົ້ນໄຮຍ້ອຍຕົ້ນໜຶ່ງ ມີຮົ່ມໜາທຶບດີ
ຂຽວຊະອຸ່ມຄ້າຍສີກ້ອນເຜືອ ທັງສີແລະສັນຖານກໍຄ້າຍກ້ອນເຜືອ

[໗໖໗] ຈຶ່ງຮັບສັ່ງກັບນາຍສາຣະຖີວ່າ ປ່າໃຫຍ່ຂຽວຊະອຸ່ມຄືສີກ້ອນເຜືອ
ທັງສີແລະສັນຖານຄ້າຍກ້ອນເຜືອ ຜາກົດຢູ່ນັ້ນແມ່ນບໍ

(ນາຍສາຣະຖີຂາບທູນວ່າ)

[໗໗໘] ຂ້າແດ່ພຣະມະຫາຣາດເຈົ້າ ນັ້ນຕົ້ນໄຣຍ້ອຍ ມີຮົ່ມໜາທຶບດີ
ຊຽວຊະອຸ່ມຄ້າຍສີກ້ອນເຜື້ອ ທັງສີແລະສັນຖານກໍຄ້າຍກ້ອນເຜື້ອ

[໗໗໙] ພຣະເຈົ້າສຸຣັດຖະສະເດັດພຣະຣາດຊະດຳເນີນໄປຈົນເຖິງປ່າໃຫຍ່
ເຊິ່ງຊຽວຊະອຸ່ມຄ້າຍສີກ້ອນເຜື້ອ
ທັງສີແລະສັນຖານກໍຄ້າຍກ້ອນເຜື້ອ ຜາກົດຢູ່

[໗໘໐] ສະເດັດລົງຈາກຄໍຊ້າງແລ້ວສະເດັດເຂົ້າໄປໃກ້ຕົ້ນໄມ້
ປະທັບນັ່ງທີ່ເຫງົ້າຕົ້ນ ພ້ອມທັງໝູ່ອຳມາດຂ້າຣາດຊະບໍຣິພານ
ໄດ້ທອດພຣະເນດເຫັນຂັນນ້ຳເຕັມແລະເຂົ້າໜົມທີ່ຖືກພຣະຫະໄທ

[໗໘໑] ບຸຣຸດຜູ້ມີຮູບລັກສະນະດັ່ງເທບ ປະດັບອາພອນພ້ອມບໍລິບູນ
ເຂົ້າໄປເຝົ້າພຣະເຈົ້າສຸຣັດຖະແລ້ວໄດ້ຂາບທູນດັ່ງນີ້ວ່າ

[໗໘໒] ຂ້າແດ່ພຣະມະຫາຣາດຊະເຈົ້າ ພຣະອົງສະເດັດມາດີແລ້ວ
ແລະກໍບໍ່ໄດ້ສະເດັດມາຮ້າຍ ຂ້າແດ່ພຣະອົງຜູ້ຊີງກຳຈັດສັດຕູ
ເຊີນພຣະອົງຜູ້ປະເສີດສະເຫວີຍນ້ຳ ແລະສະເຫວີຍເຂົ້າໜົມເທີ້ນ

[໗໘໓] ພຣະເຈົ້າສຸຣັດຖະພ້ອມດ້ວຍອຳມາດແລະຂ້າຣາດຊະບໍຣິພານ
ພາກັນດື່ມນ້ຳແລະກິນເຂົ້າໜົມແລ້ວ ຈຶ່ງຕັດຖາມວ່າ

[໗໘໔] ທ່ານເປັນເທວະດາຫຼືຄົນທັນ ຫຼືເປັນທ້າວສັກກະປຸຣິນທະທະ
ພວກເຮົາບໍ່ຮູ້ຈັກຈຶ່ງຂໍຖາມທ່ານ
ພວກເຮົາຈະເພິ່ງຮູ້ຈັກທ່ານໄດ້ແນວໃດ

(ນັນທະກະເຜດຂາບທູນວ່າ)

[໗໘໕] ຂ້າພຣະອົງບໍ່ແມ່ນເທວະດາ ບໍ່ແມ່ນຄົນທັນ
ທັງບໍ່ແມ່ນທ້າວສັກກະປຸຣິນທະທະ
ຂ້າພຣະອົງເປັນເຜດ ມາຈາກຖິ່ນສຸຣັດຖະວິໄສ ມາຢູ່ບ່ອນນີ້
(ພຣະຣາຊາຕັດຖາມວ່າ)

[໗໘໖] ແຕ່ກ່ອນ ທ່ານຢູ່ໃນສຸຣັດຖະວິໄສ
ມີປົກກະຕິນິໄສແນວໃດ ມີຄວາມປະພຶດແນວໃດ
ຍ້ອນຄວາມດີອັນໃດ ທ່ານຈຶ່ງມີອານຸພາບແນວນີ້

(ນັນທະກະເຜດຂາບທູນວ່າ)

[໑໘໗] ຂ້າແດ່ພຣະມະຫາຣາດຊະເຈົ້າ ຜູ້ຊົງຜາບອະຣິຣາດສັດຕູ
ຊົງຜະດຸງຣັດໃຫ້ຈະເລີນ ຂໍພຣະອົງຊົງສະດັບຄວາມນັ້ນ
ອຳນາດ ຂ້າຣາດຊະບໍຣິພານ ແລະພາມ ປຸໂລຫິດ ກໍເຊີນສະດັບດ້ວຍ

[໑໘໘] ຂໍເດຊະ(ແຕ່ກ່ອນ) ຂ້າພຣະອົງເປັນບຸຣຸດ ຢູ່ໃນສຸຣັດຖະວິໄສ
ເປັນຄົນໃຈບາບ ເປັນມິດສາທິດຖິ ທຸສີນ ຂີ້ຖີ່
ແລະດ່າວ່າສະມະນະພາມທັງຫຼາຍ

[໑໘໙] ເມື່ອຊົນເຫຼົ່າອື່ນກຳລັງເຮັດບຸນໃຫ້ທານ
ຂ້າພຣະອົງກໍເຮັດອັນຕະລາຍສາ ຊ້ຳຍັງຫ້າມໝູ່ຊົນວ່າ

[໑໙໐] ຜົນທານບໍ່ມີ ຜົນແຫ່ງຄວາມສັງລວມຈັກມີແຕ່ບ່ອນໃດ
ໃຜຜູ້ຊື່ວ່າເປັນອາຈານບໍ່ມີ
ໃຜນໍຈັກເຝິກຝົນບຸກຄົນຜູ້ບໍ່ເຄີຍເຝິກຝົນໄດ້

[໑໙໑] ສັດທັງຫຼາຍເທົ່າທຽມກັນ
ຜູ້ອ່ອນນ້ອມຕໍ່ຜູ້ໃຫຍ່ໃນຕະກູນຈຶ່ງບໍ່ຕ້ອງມີ
ກຳລັງຫຼືຄວາມພຽນກໍບໍ່ຕ້ອງມີ
ຄວາມພາກພຽນຂອງບຸຣຸດຈັກມີແຕ່ບ່ອນໃດ

[໑໙໒] ທຳມະດາຜົນທານຍ່ອມບໍ່ມີ
ໃຜຈະເຮັດບຸກຄົນຜູ້ມີເວນໃຫ້ມົດຈິດດ້ວຍທານບໍ່ໄດ້
ສັດຍ່ອມໄດ້ສຸກຫຼືທຸກທີ່ຄວນໄດ້ເອງ
ສຸກຫຼືທຸກທີ່ເກີດຈາກການຜັນແປ ສັດນຳມາເອງ

[໑໙໓] ມານດາບໍ່ມີ ບິດາບໍ່ມີ ອ້າຍບໍ່ມີ ນ້ອງຊາຍບໍ່ມີ
ໂລກນີ້ບໍ່ມີ ໂລກໜ້າບໍ່ມີ
ທານທີ່ບຸກຄົນໃຫ້ແລ້ວຍ່ອມບໍ່ມີຜົນ ການບູຊາກໍບໍ່ມີຜົນ
ທານແລະການບູຊາທີ່ຕັ້ງໄວ້ດີແລ້ວກໍບໍ່ມີຜົນ

[໑໙໔] ຄົນແມ່ນຂ້າຄົນ (ຫຼື) ຕັດຄໍຄົນອື່ນ ກໍບໍ່ຊື່ວ່າໃຜຂ້າໃຜ
ເປັນແຕ່ອາວຸດ ສຽບເຂົ້າໄປໃນລະຫວ່າງປ່ອງກາຍທັງ ໗ ປ່ອງ໌

[໓໗๕] ຊີວະ ໌ ຂອງສັດທັງຫຼາຍ ບໍ່ຖືກຕັດ ບໍ່ຖືກທຳລາຍ
ບາງເວລາມີ ໗ ຫຼຸ່ມ ບາງເວລາກົມຄືປຸ່ງນ້ຳອ້ອຍ
ບາງເວລາສູງ ๕໐໐ ໂຍດ ໃຜບໍ່ສາມາດຈະຕັດຊີວະໃຫ້ຂາດໄດ້

[໓໗໓] ຄືເມື່ອປຸ້ມຝ້າຍທີ່ຖືກດີກໄປ
ປຸ້ມຝ້າຍນັ້ນຍ່ອມມາຍກິ້ງໄປໄດ້ ສັນໃດ
ເຖິງຊີວະນັ້ນກໍຄືກັນສັນນັ້ນ ຍ່ອມແຫວກໜີອອກໄປຈາກຮ່າງໄດ້

[໓໗໗] ຄືບຸກຄົນອອກຈາກເຮືອນໜຶ່ງ ເຂົ້າສູ່ເຮືອນໜຶ່ງ ສັນໃດ
ເຖິງຊີວະນັ້ນກໍຄືກັນສັນນັ້ນ ອອກຈາກຮ່າງໜຶ່ງ ເຂົ້າສູ່ອີກຮ່າງໜຶ່ງ

[໓໗໗] ຄືບຸກຄົນອອກຈາກເຮືອນຫຼັງໜຶ່ງ ເຂົ້າສູ່ອີກເຮືອນຫຼັງໜຶ່ງ ສັນໃດ
ເຖິງຊີວະນັ້ນກໍຄືກັນສັນນັ້ນ ອອກຈາກຮ່າງໜຶ່ງ ເຂົ້າສູ່ອີກຮ່າງໜຶ່ງ
[໓໗໙] ເມື່ອສິ້ນກຳນົດ ໗,๔໐໐,໐໐໐ ມະຫາກັບ
ສັດທັງຫຼາຍຈະເປັນພານຫຼືບັນດິດກໍຕາມ
ຈັກຍັງສັງສາຣະວັດໃຫ້ສິ້ນໄປແລ້ວ ຈັກເຮັດບ່ອນສຸດທຸກໄດ້ເອງ

[໓໙໐] ສຸກແລະທຸກ ຄືຕັກຕວງໄດ້ດ້ວຍໂອແລະກະບຸງ
ພຣະຊິນນະເຈົ້າຍ່ອມຮູ້ທຸກສິ່ງທຸກຢ່າງ ໝູ່ສັດນອກນີ້ລ້ວນເປັນຜູ້ລຸ້ມຫຼົງ

[໓໙໑] ເມື່ອຊາດກ່ອນ ຂ້າພຣະອົງມີຄວາມເຫັນແນວນີ້ ຈຶ່ງໄດ້ເປັນຄົນຫຼົງ
ຖືກໂມຫະຄອບງຳ ເປັນມິດສາທິດຖິ ທຸສິນ ຂີ້ຖີ່
ແລະດ່າວ່າສະມະນະພາມທັງຫຼາຍ

[໓໙๘] ພາຍໃນ ໓ ເດືອນ ຂ້າພຣະອົງຈັກຕາຍ
ຈັກຕົກນະຣົກອັນຮ້ອນຣົນແສນສາຫັດ

[໓໙໓] ນະຣົກນັ້ນມີ ๔ ຫຼຸ່ມ ມີປະຕູ ๔ ດ້ານ
ກຳສ້າງຈຳແນກໄວ້ເປັນສ່ວນ ໆ
ອ້ອມຮອບດ້ວຍກຳແພງເຫຼັກ ຄອບໄວ້ດ້ວຍແຜ່ນເຫຼັກ

[໓໙๔] ພື້ນນະຣົກນັ້ນລ້ວນເປັນເຫຼັກແດງລຸກເປັນແປວເພີງ
ປະກອບດ້ວຍຄວາມຮ້ອນ
ແຜ່ໄປຮອບຕະຫຼອດຮ້ອຍໂຍດຢູ່ຕະຫຼອດການ

[໙໘໕] ລ່ວງໄປ ໑໐໐,໐໐ ປີ ໃນການນັ້ນ ຂ້າພຣະອົງໄດ້ຍິນສຽງອື້ອຶງ
(ວ່າ ສະຫາຍຜູ້ຮ່ວມທຸກທັງຫຼາຍເມື່ອພວກທ່ານໄໝ້ຢູ່ໃນນະຮົກນີ້
ການປະມານ ໑໐໐,໐໐໐ ປີລ່ວງໄປແລ້ວ)
ຂ້າແດ່ພຣະມະຫາຣາດເຈົ້າ ໑໐໐ ໂກດປີເປັນກຳນົດຂອງນະຮົກ

[໙໘໙] ຊົນທັງຫຼາຍເປັນມິດສາທິດຖິ ທຸສິນ ແລະຕິຕຽນພຣະອະຣິຍະ
ຍ່ອມມົກໄໝ້ຢູ່ໃນນະຮົກເຖິງ ໑໐໐,໐໐໐ ໂກດປີ

[໙໘໗] ຂ້າພຣະອົງຈັກສະເຫວີຍທຸກຂະເວທະນາໃນນະຮົກນັ້ນເປັນເວລາຍາວນານ
ນີ້ເປັນຜົນກຳອັນຊົ່ວຊ້າຂອງຂ້າພຣະອົງ
ຍ້ອນແນວນັ້ນ ຂ້າພຣະອົງຈຶ່ງເສົ້າໂສກຢ່າງໜັກ

[໙໘໘] ຂ້າແດ່ພຣະມະຫາຣາດເຈົ້າ ຜູ້ຊົງຜາບອະຣິຣາດ ຊົງຜະດຸງຣັດໃຫ້ຈະເລີນ
ຂໍພຣະອົງຊົງສະດັບຄວາມນັ້ນ
ຂໍຄວາມຈະເລີນຈົ່ງມີແດ່ຂ້າພຣະອົງແລະອຸດຕະຣາທິດາຂອງຂ້າພຣະອົງ

[໙໘໘] ນາງເຮັດແຕ່ກຳດີ ຍິນດີແລ້ວໃນນິດຈະສີນແລະອຸໂປສົດສີນ
ຮູ້ຄວາມປະສົງຂອງຜູ້ຂໍ ປາສະຈາກຄວາມຂີ້ຖີ່ ແລະຍິນດີໃນທານ

[໗໐໐] ເປັນສະໃພ້ຕະກູນອື່ນກໍຍັງຄົງຮັກສາສີນບໍ່ບົກຜ່ອງຢູ່ປະຈຳ
ແລະເປັນອຸປາສິກາຂອງພຣະສາກະຍະມຸນີສຳມາສຳພຸດທະເຈົ້າຜູ້ຊົງສີຣິ

[໗໐໑] ພິກຂຸອົງໜຶ່ງ ມີສີນສົມບູນ ສັງລວມຕາ ມີສະຕິ ຄຸ້ມຄອງອິນຊີ
ສັງລວມລະວັງເປັນອັນດີ ເຂົ້າມາບິນທະບາດຍັງໝູ່ບ້ານ

[໗໐໒] ຍ່າງໄປຕາມລຳດັບຮ່ອມ ໄດ້ມາເຖິງເຮືອນນັ້ນ
ຂ້າແດ່ພຣະມະຫາຣາດເຈົ້າ ຂໍຄວາມຈະເລີນຈົ່ງມີແດ່ພຣະອົງ
ນາງອຸດຕະຣາໄດ້ເຫັນພິກຂຸນັ້ນແລ້ວ

[໗໐໓] ນາງໄດ້ຖວາຍນ້ຳດື່ມເຕັມໂອແລະເຂົ້າໜົມອັນວິຈິດແລ້ວ
ອຸທິດວ່າ ຂໍຜົນທານທີ່ຂ້ານ້ອຍຖວາຍແລ້ວນີ້
ຈົ່ງສຳເລັດແກ່ບິດາຂອງຂ້ານ້ອຍເຊິ່ງຕາຍໄປແລ້ວເທີ້ນ ຂ້ານ້ອຍ

[໗໐໔] ໃນຂະນະທີ່ນາງອຸທິດສ່ວນບຸນໃຫ້ນັ້ນເອງ ວິບາກກໍເກີດຂຶ້ນ
ຂ້າພຣະອົງສຳເລັດຄວາມປະສົງດັ່ງປາຖະໜາ

ບໍຣິໂພກການສຸກຢູ່ ຄືທ້າວເວດສະວັນມະຫາຣາດ

[ກ໐໕] ຂ້າແດ່ພຣະມະຫາຣາດເຈົ້າ ຜູ້ຊົງຜາບອະຣິຣາດ
ຊົງຜະດຸງຣັດໃຫ້ຈະເລີນ ຂໍພຣະອົງຈົ່ງຊົງສະດັບຄວາມນັ້ນ
ບັນດິດກ່າວວ່າ ພຣະພຸດທະເຈົ້າເປັນບຸກຄົນຜູ້ເລີດຂອງໂລກ
ພ້ອມທັງເທວະໂລກ ຂໍພຣະອົງພ້ອມດ້ວຍພຣະຣາດຊະໂອຣົດ
ແລະພຣະອັກຄະຣະມະເຫສີ ຊົງເຖິງພຣະພຸດທະເຈົ້າພຣະອົງນັ້ນວ່າ
ເປັນບ່ອນເພິ່ງບ່ອນຣະນຶກເທີ້ນ

[ກ໐໖] ຊົນທັງຫຼາຍຍ່ອມບັນລຸອະມະຕະບົດດ້ວຍມັກມີອົງ ໘
ຂ້າແດ່ພຣະອົງຜູ້ຊົງຜາບອະຣິຣາດ
ຂໍພຣະອົງພ້ອມດ້ວຍພຣະຣາດຊະໂອຣົດແລະພຣະອັກຄະຣະມະເຫສີ
ຈົ່ງຊົງເຖິງພຣະທຳນັ້ນ ວ່າເປັນບ່ອນເພິ່ງບ່ອນຣະນຶກເທີ້ນ

[ກ໐໗] ພຣະອະຣິຍະບຸກຄົນຜູ້ບັນລຸອະຣິຍະມັກ ໔
ແລະພຣະອະຣິຍະບຸກຄົນຜູ້ດຳລົງຢູ່ໃນອະຣິຍະຜົນ ໔ ຊື່ວ່າພຣະສົງ
ຜູ້ປະຕິບັດກົງ ມີສິນ ສະມາທິແລະປັນຍາ
ຂໍພຣະອົງພ້ອມດ້ວຍພຣະຣາດຊະໂອຣົດແລະພຣະອັກຄະຣະມະເຫສີ
ຊົງເຖິງພຣະສົງນັ້ນ ວ່າເປັນບ່ອນເພິ່ງບ່ອນຣະນຶກເທີ້ນ

[ກ໐໘] ຂໍພຣະອົງຊົງຟ້າວງົດເວັ້ນຈາກການຂ້າສັດ
ເວັ້ນຂາດຈາກການລັກຊັບ
ຊົງຍິນດີສະເພາະພຣະມະເຫສີຂອງພຣະອົງ
ບໍ່ຕັດຄຳຕົວະ ບໍ່ສະເຫວີຍນ້ຳຈັນເທີ້ນ

(ພຣະຣາຊາຕັດວ່າ)

[ກ໐໙] ເທວະດາຜູ້ຄວນບູຊາ ທ່ານເປັນຜູ້ມຸ້ງປະໂຫຍດເກື້ອກູນແກ່ເຮົາ
ເຮົາຈະເຮັດຕາມຄຳຂອງທ່ານ
ທ່ານເປັນອາຈານຂອງເຮົາ

[ກ໑໐] ເຮົາຂໍເຖິງພຣະພຸດທະເຈົ້າເຊິ່ງເປັນຜູ້ປະເສີດກວ່າເທວະດາແລະມະນຸດ
ພຣະທຳອັນປະເສີດ ແລະພຣະສົງວ່າເປັນບ່ອນເພິ່ງບ່ອນຣະນຶກ
[ກ໑໑] ເຮົາຈະຟ້າວງົດເວັ້ນຈາກການຂ້າສັດ

ເວັ້ນຂາດຈາກການລັກຊັບໃນໂລກ
ຍິນດີສະເພາະພັນລະຍາຂອງຕົນ
ຈະບໍ່ເວົ້າຕົວະ ບໍ່ດື່ມນໍ້າເມົາ

[໗໑໘] ເຮົາຈະຜ່ອນຄາຍຄວາມເຫັນຊົ່ວ
ຄືໂຮຍແກບໃຫ້ລອຍໄປຕາມລົມແຮງ
ຫຼືຄືຖິ້ມເສດໄມ້ໃບຫຍ້າລົງກະແສນໍ້າໄຫຼ
ແລະຍິນດີໃນພຣະພຸດທະສາດສະໜາ

[໗໑໙] ພຣະເຈົ້າສຸຣັດຖະເມື່ອຕັດດັ່ງນີ້ແລ້ວ
ຊົງງົດເວັ້ນຈາກຄວາມເຫັນຊົ່ວ
ຊົງນອບນ້ອມແດ່ພຣະຜູ້ມີພຣະພາກເຈົ້າແລ້ວ
ສະເດັດຊົງລົດພຣະທີ່ນັ່ງ
ບ່າຍພຣະພັກໄປທາງທິດຕາເວັນອອກ

**ນັນທະກະເປຕະວັດຖຸທີ ໓ ຈົບ**

# ໔. ເຣວະຕີເປຕະວັດຖຸ

## ເລື້ອງນາງເຣວະດີເຜດ

(ຍັກບໍລິວານຂອງທ້າວເວດສະວັນປາຖະໜາຈະຈັບນາງເຣວະດີໂຍນລົງໄປໃນອຸດສະທະນະຣົກ
ຈຶ່ງກ່າວວ່າ)

[໗໑໔] ຈົ່ງລຸກຂຶ້ນ ນາງເຣວະດີຜູ້ແສນຈະຊົ່ວຊ້າ ມີປົກກະຕິບໍ່ໃຫ້ທານ
ປະຕູ(ນະຣົກ)ເປີດແລ້ວ
ພວກເຮົາຈະນໍາເຈົ້າໄປໂຍນລົງນະຣົກ
ອັນເປັນສະຖານທີ່ທອດຖອນໃຈຂອງເຫຼົ່າສັດນະຣົກ
ຜູ້ມີຄວາມທຸກທໍລະມານທົນທຸກຢູ່

(ພຣະສັງຄີຕິກາຈານທັງຫຼາຍກ່າວວ່າ)

[໗໑໕] ຍັກໃຫຍ່ຕາແດງສອງຕົນຄືທູດພະຍາຍົມນັ້ນ ເມື່ອກ່າວດັ່ງນີ້ແລ້ວ
ກໍຈັບແຂນນາງເຣວະດີຄົນລະຂ້າງ ພາໄປໃກ້ໝູ່ເທວະດາ

(ນາງເຣວະດີຖາມຍັກສອງຕົນວ່າ)

[໗໑໖] ນັ້ນວິມານຂອງໃຜ ມີຣັດສະໝີດັ່ງແສງອາທິດ ໜ້າພໍໃຈ
ເຮືອງຮອງ ງົດງາມ ໜ້າຢູ່ອາໄສ ປົກຄຸມດ້ວຍຕາໜ່າງຄຳ
ເນືອງແໜ້ນໄປດ້ວຍເທບພະບຸດແລະເທບທິດາ ຮຸ່ງເຮືອງດັ່ງແສງອາທິດ

[໗໑໗] ໝູ່ເທບນາຣີລູບທາກາຍດ້ວຍແກ່ນຈັນຫອມ
ຊ່ອຍເຮັດວິມານທັງພາຍໃນແລະພາຍນອກໃຫ້ງົດງາມ
ວິມານນັ້ນມີຣັດສະໝີຜາກົດສະເໝີດ້ວຍແສງອາທິດ
ຄົນທີ່ຂຶ້ນສະຫວັນບັນເທີງຢູ່ໃນວິມານເປັນໃຜກັນ

(ຍັກສອງຕົນຈຶ່ງບອກແກ່ນາງເຣວະດີວ່າ)

[໗໑໘] ທີ່ນະຄອນພາຣານະສີ ມີອຸປາສົກຊື່ນັນທິຍະ
ເປັນຄົນບໍ່ຂີ້ຖີ່ ເປັນທານະບໍດີ ຮູ້ຄວາມປະສົງຂອງຜູ້ຂໍ
ວິມານທີ່ເນືອງແໜ້ນໄປດ້ວຍເທບພະບຸດແລະເທບທິດາ
ຮຸ່ງເຮືອງດັ່ງແສງອາທິດນັ້ນເປັນຂອງນັນທິຍະອຸປາສົກ
[໗໑໙] ໝູ່ເທບນາຣີລູບທາກາຍດ້ວຍແກ່ນຈັນຫອມ
ຊ່ອຍເຮັດວິມານທັງພາຍໃນແລະພາຍນອກໃຫ້ງົດງາມ
ວິມານນັ້ນມີຣັດສະໝີຜາກົດສະເໝີດ້ວຍແສງອາທິດ
ຄົນທີ່ຂຶ້ນສະຫວັນ ບັນເທີງຢູ່ໃນວິມານ ຄື ນັນທິຍະອຸປາສົກ

(ນາງເຣວະດີກ່າວວ່າ)

[໗໒໐] ຜູ້ຂ້າເປັນພັນລະຍາຂອງນັນທິຍະອຸປາສົກ
ເປັນໃຫຍ່ໃນເຮືອນ ເປັນໃຫຍ່ໃນຊັບສິນທັງໝົດຂອງສາມີ
ບັດນີ້ ຜູ້ຂ້າຈະອອນຊອນໃນວິມານຂອງສາມີ
ບໍ່ປາຖະໜາຈະເຫັນນະຣົກ

(ຍັກສອງຕົນນັ້ນບໍ່ຍອມເຊື່ອຈຶ່ງພາໂຕນາງລົງໄປໃກ້ອຸດສະທະນະຣົກແລ້ວກ່າວວ່າ)

[໗໒໑] ນາງຜູ້ແສນຈະຊົ່ວຊ້າ ນີ້ແລ້ວນະຣົກສຳລັບເຈົ້າ
ບຸນເຈົ້າບໍ່ໄດ້ເຮັດໄວ້ໃນມະນຸດສາໂລກ
ຍ້ອນຄົນຂີ້ຖີ່ມັກໂກດມີບາບທຳ
ຍ່ອມບໍ່ໄດ້ຢູ່ຮ່ວມກັບຜູ້ເກີດໃນສະຫວັນ

(ນາງເຣວະດີເຫັນນາຍນິຣະຍະບານສອງຕົນ ພາກັນມາດຶງລາກຕົນເພື່ອຈະໂຍນລົງໄປໃນຄູດ
ນະຣົກ ຊື່ວ່າສັງສະວະກະ ຈຶ່ງຖາມເຖິງນະຣົກນັ້ນວ່າ)

[ກ໘໘] ເປັນຫຍັງນໍຈຶ່ງຜາກົດແຕ່ອຸດຈາຣະ ປັດສາວະ ສິ່ງສົກກະປົກ
ເປັນຫຍັງ ອຸດຈາຣະນີ້ຈຶ່ງມີກິ່ນເໝັນດຸຮ້າຍ ຄະຄຸ້ງໄປນໍ

(ນາຍນິຣະຍະບານຕອບວ່າ)

[ກ໘໙] ນາງເຣວະດີ ນະຣົກທີ່ເຈົ້າຈະມົກໄໝ້ຢູ່ຫຼາຍພັນປີນີ້
ມີຊື່ວ່າສັງສະວະກະນະຣົກ ເລິກ ໑໐໐ ຊົ່ວຄົນ

(ນາງເຣວະດີຈຶ່ງຖາມວ່າ)

[ກ໘໔] ຜູ້ຂ້າເຮັດກຳຊົ່ວທາງກາຍວາຈາໃຈອັນໃດບໍ
ຈຶ່ງຕົກສັງສະວະກະນະຣົກທີ່ເລິກ ໑໐໐ ຊົ່ວຄົນ

(ນາຍນິຣະຍະບານຕອບວ່າ)

[ກ໘໕] ເຈົ້າລວງສະມະນະພາມແລະວະນິພົກພວກອື່ນ
ດ້ວຍການກ່າວຕົວະ ນັ້ນແລບາບທີ່ເຈົ້າເຮັດໄວ້

[ກ໘໖] ຍ້ອນບາບນັ້ນເຈົ້າຈຶ່ງຕົກສັງສະວະກະນະຣົກທີ່ເລິກເຖິງ ໑໐໐ ຊົ່ວຄົນ
ນາງເຣວະດີ ເຈົ້າຈະຕ້ອງມົກໄໝ້ຢູ່ໃນນະຣົກນັ້ນຫຼາຍພັນປີ

[ກ໘ກ] ນາຍນິຣະຍະບານທັງຫຼາຍ ຈະຕັດມື ຕີນ ຫູ ແມ່ນກະທັ່ງດັງ
ອັນໜຶ່ງແມ່ນຝູງນົກກາກໍຈະພາກັນມາຫຸ້ມຈິກກິນເຈົ້າທີ່ດີ້ນທຸຣົນທຸຣາຍຢູ່

(ນາງເຣວະດີກ່າວວ່າ)

[ກ໘໗] ໂຜດເທີ້ນທ່ານ ຂໍທ່ານທັງຫຼາຍຊ່ອຍ ຜູ້ຂ້າເຮົາກັບໄປເທີ້ນ
ຜູ້ຂ້າຈັກສ້າງກຸສົນກຳທີ່ຄົນເຮັດແລ້ວໄດ້ຮັບຄວາມສຸກ
ແລະບໍ່ເດືອດຮ້ອນໃນພາຍຫຼັງນັ້ນໃຫ້ຫຼາຍ
ດ້ວຍການໃຫ້ທານ ປະພຶດທຳສະໝ່ຳສະເໝີ
ການສັງລວມ ແລະການເຝິກອິນຊີ

(ນາຍນິຣະຍະບານກ່າວວ່າ)

[໑໔໙] ແຕ່ກ່ອນ ເຈົ້າຜະໝາດມົວເມົາ ບັດນີ້ຈະມາຮ້ອງໄຫ້ເຮັດຫຍັງນໍ
ເຈົ້າຈັກຕ້ອງສະເຫວີຍຜົນກຳທັງຫຼາຍທີ່ເຈົ້າເຮັດໄວ້ເອງ

(ນາງເຣວະດີກ່າວວ່າ)

[໑໕໐] ໃຜຈາກເທວະໂລກໄປສູ່ມະນຸດສາໂລກ ເມື່ອຖືກຖາມ
ເພິ່ງກ່າວຄຳເວົ້າຂອງຜູ້ຂ້າແນວນີ້ວ່າ
ຂໍທ່ານທັງຫຼາຍຈົ່ງຖວາຍທານ ຄື ຜ້ານຸ່ງ ຜ້າຫົ່ມ
ບ່ອນນອນ ບ່ອນນັ່ງ ເຂົ້າແລະນ້ຳ
ໃນສະມະນະພາມທັງຫຼາຍຜູ້ປ່ອຍວາງອາດຍາ
ຍ້ອນວ່າ ຄົນຂີ້ຖີ່ ມັກໂກດ ມີບາບທຳ
ຍ່ອມບໍ່ໄດ້ເກີດຮ່ວມກັບຜູ້ໄປສະຫວັນ

[໑໕໑] ຖ້າຜູ້ຂ້ານັ້ນຈາກບ່ອນນີ້ໄປ ໄດ້ເກີດເປັນມະນຸດແລ້ວ
ຈັກຮູ້ຄວາມປະສົງຂອງຜູ້ຂໍ ສົມບູນດ້ວຍສິນ
ຈັກສ້າງກຸສົນໃຫ້ຫຼາຍດ້ວຍການໃຫ້ທານ
ການປະພຶດທຳສະໝ່ຳສະເໝີ
ການສັງລວມ ແລະການເຝິກອິນຊີ

[໑໕໒] ຜູ້ຂ້າຈັກປູກສວນໄມ້ດອກຕົ້ນໄມ້ກິນໝາກ
ຈັກຕັດທາງເຂົ້າໄປໃນສະຖານທີ່ທີ່ຍ່າງລຳບາກ
ຂຸດນ້ຳສ້າງ ແລະຕັ້ງນ້ຳດື່ມໄວ້ດ້ວຍໃຈທີ່ຜ່ອງແຜ້ວ

[໑໕໓] ຈັກເຂົ້າຈຳອຸໂປສົດສິນເຊິ່ງປະກອບດ້ວຍອົງ ๘

ທຸກມື້ຂຶ້ນ ໑໔ ຄ່ຳ ໑໕ ຄ່ຳ ແລະ ๘ ຄ່ຳແຫ່ງປັກ
ເມິດມື້ປາຕິຫາຣິຍະປັກ

[໑໕໔] ຜູ້ຂ້າຜູ້ສັງລວມລະວັງໃນສິນຕະຫຼອດເວລາ
ແລະຈັກບໍ່ລະເລີຍໃນການໃຫ້ທານ
ຍ້ອນຜົນກຳນີ້ ຜູ້ຂ້າໄດ້ເຫັນເອງແລ້ວ

(ພຣະສັງຄີຕິກາຈານກ່າວໄວ້ວ່າ)

[໑໕໕] ນາຍນິຣະຍະບານທັງຫຼາຍຊ່ອຍກັນຈັບນາງເຣວະດີ

ທີ່ກຳລັງພ່ຳເພີ້ ດີ້ນຮົນໄປມາຢູ່ຢ່າງນີ້
ໃຫ້ຕີນຊີ້ຫົວດິ່ງລົງໄປໃນນະຣົກອັນເປັນຕາຢ້ານ

(ນາງເຣວະດີໄດ້ກ່າວຄາຖາສຸດທ້າຍອີກວ່າ)

[໗໓໖] ຊາດກ່ອນ ຜູ້ຂ້າເປັນຄົນຂີ້ຖີ່
ດ່າວ່າສະມະນະພາມ
ແລະລວງສາມີດ້ວຍເລື້ອງບໍ່ຈິງ
ຈຶ່ງມົກໄໝ້ໃນນະຣົກທີ່ເປັນຕາຢ້ານ

**ເຣວະຕີເປຕະວັດຖຸທີ ໔ ຈົບ**

## ໕. ອຸດສຸເປຕະວັດຖຸ

## ເລື້ອງເຜດເຈົ້າຂອງໄຮ່ອ້ອຍ

(ອຸດສຸເຜດຖາມພຣະມະຫາໂມກຄັນລານະເຖຣະວ່າ)

[໗໓໗] ໄຮ່ອ້ອຍຜືນໃຫຍ່ນີ້ເກີດມີແກ່ຂ້ານ້ອຍ ເປັນຜົນບຸນບໍ່ແມ່ນໜ້ອຍ
ດ່ຽວນີ້ ຂ້ານ້ອຍກິນອ້ອຍນັ້ນບໍ່ໄດ້
ທ່ານຜູ້ຈະເລີນ ນິມົນທ່ານບອກດ້ວຍເທີ້ນວ່າ ນີ້ເປັນຜົນກຳອັນໃດ

[໗໓໘] ຂ້ານ້ອຍເດືອດຮ້ອນ ຢາກຈະກິນ(ອ້ອຍ)
ພະຍາຍາມຕະກຽກຕະກາຍ ທົນທຸກ
ຈະກິນຈັກໜ້ອຍໜຶ່ງ ກໍສິ້ນເຫື່ອແຮງ ພ່ຳເພີ້ຢູ່
ນີ້ເປັນຜົນກຳອັນໃດ

[໗໓໙] ອັນໜຶ່ງ ຂ້ານ້ອຍໝົດເຫື່ອແຮງແລ້ວ ຊວນເຊລົ້ມລົງ
ດີ້ນປາດ ໆ ຢູ່ເທິງພື້ນດິນ ຄືປາດີ້ນຮົນຢູ່ເທິງບົກທີ່ຮ້ອນຫຼາຍ

ກໍເມື່ອຂ້ານ້ອຍຮ້ອງໄຫ້ຢູ່ ສັດທັງຫຼາຍພາກັນມາກິນນ້ຳຕາຂອງຂ້ານ້ອຍ ທ່ານຜູ້ຈະເລີນ ນີ້ເປັນຜົນກຳອັນໃດ?

[໗໔໐] ຂ້ານ້ອຍທັງອິດເມື່ອຍ ທັງຫິວກະຫາຍ
ປາກຄໍແຫ້ງຜາກ ບໍ່ປະສົບຄວາມສຸກສຸກສະບາຍ
ທ່ານຜູ້ຈະເລີນ ເຮັດແນວໃດນໍ ຂ້ານ້ອຍຈຶ່ງຈະກິນອ້ອຍໄດ້

(ພຣະມະຫາໂມກຄັນລານະເຖຣະກ່າວວ່າ)

[໓໔໑] ເມື່ອຊາດກ່ອນ ທ່ານເກີດເປັນມະນຸດໄດ້ເຮັດກຳໄວ້ດ້ວຍຕົນເອງ
ເຮົາຈະບອກ ທ່ານຈົ່ງຟັງໃຫ້ເຂົ້າໃຈ

[໓໔໒] ທ່ານຍ່າງກິນອ້ອຍໄປ
ບຸຣຸດຄົນໜຶ່ງຍ່າງນຳຫຼັງທ່ານ
ແລະເຂົາຫວັງຈະກິນອ້ອຍ ຈຶ່ງຂໍທ່ານ
ທ່ານບໍ່ໄດ້ເວົ້າອັນໃດກັບເຂົາ

[໓໔໓] ແລະເຂົາໄດ້ວິງວອນທ່ານເຊິ່ງບໍ່ເວົ້ານຳ
ໄດ້ເວົ້າກັບທ່ານວ່າ ຂໍທ່ານໃຫ້ອ້ອຍແດ່ເທີ້ນນາຍ
ທ່ານໄດ້ຍື່ນອ້ອຍໃຫ້ແກ່ບຸຣຸດນັ້ນທາງຫຼັງ
ນີ້ເປັນຜົນກຳນັ້ນແລ

[໓໔໔] ຂໍເຊີນທ່ານອວ່າຍຫຼັງໄປຈັບເອົາ
ເມື່ອຮັບແລ້ວ ເຊີນກິນອ້ອຍນັ້ນຕາມຕ້ອງການເທີ້ນ
ຍ້ອນເຫດນັ້ນແລ ທ່ານຈັກເປັນຜູ້ດີໃຈ
ແຈ່ມໃສ ເບີກບານ ແລະບັນເທີງໃຈ

[໓໔໕] ເຜດນັ້ນໄດ້ອວ່າຍຫຼັງໄປຈັບອ້ອຍ
ເມື່ອຮັບແລ້ວ ກິນອ້ອຍນັ້ນຕາມຄວາມຕ້ອງການ
ຍ້ອນເຫດນັ້ນແລ ເຜດນັ້ນຈຶ່ງດີໃຈ
ແຈ່ມໃສ ເບີກບານ ແລະບັນເທີງໃຈ

**ອຸດສຸເປຕະວັດຖຸທີ ໕ ຈົບ**

## ໖. ກຸມາຣະເປຕະວັດຖຸ
## ເລື້ອງກຸມານເຜດ

(ພຣະສາດສະດາຕັດວ່າ)

[໓໔໖] ເຮົາໄດ້ຟັງມາດັ່ງນີ້ວ່າ
ໄດ້ມີກຸມານສອງອົງເປັນພຣະຣາດຊະໂອຣົດ
ໃນນະຄອນສາວັດຖີ ຂ້າງປ່າຫິມະພານ

[໗໔໗] ພຣະຣາດຊະກຸມານທັງ ໔ ພຣະອົງນັ້ນ
ຊຶ່ງມົວເມົາໃນອາລົມເປັນບ່ອນຕັ້ງແຫ່ງຄວາມກຳໜັດ
ຊຶ່ງເພີດເພີນດ້ວຍອຳນາດ ຄວາມຍິນດີໃນກາມ
ຊຶ່ງຕິດຄວາມສຸກໃນປັດຈຸບັນ
ບໍ່ຊຶ່ງເຫັນເຖິງຄວາມສຸກໃນອະນາຄົດ
[໗໔໘] ເມື່ອເຄື່ອນຈາກຄວາມເປັນມະນຸດນີ້ໄປສູ່ປະຣະໂລກ
ບໍ່ຜາກົດກາຍໃຫ້ໃຜເຫັນ
ຮ້ອງຮ່ຳໄຮເຖິງກຳຊົ່ວຄັ້ງກ່ອນຂອງຕົນ
ຢູ່ບ່ອນໃກ້ນະຄອນສາວັດຖີນີ້ວ່າ
[໗໔໙] ເມື່ອພຣະທັກຂີໄນຍະບຸກຄົນມີຢູ່ຈຳນວນຫຼາຍ
ແລະເມື່ອວັດຖຸທານກໍມີຢູ່
ແຕ່ພວກເຮົາບໍ່ອາດເຮັດບຸນເຊິ່ງຈະນຳຄວາມສຸກມາໃຫ້
ແລ້ວເຮັດຕົນໃຫ້ມີຄວາມປອດໄພ(ແມ່ນພຽງ)ເລັກໜ້ອຍ
[໗໕໐] ອັນໃດຈະເພິ່ງຊົ່ວກວ່າການນັ້ນ
ອັນເປັນເຫດໃຫ້ພວກເຮົາເຄື່ອນຈາກຣາດຊະສະກຸນແລ້ວໄປຢູ່ເປຕະວິໄສ
ພຽບພ້ອມໄປດ້ວຍຄວາມຫິວກະຫາຍ
[໗໕໑] ມະນຸດທັງຫຼາຍໃນໂລກນີ້ເຄີຍເປັນເຈົ້າຂອງໃນບ່ອນໃດ
ຍ່ອມບໍ່ໄດ້ເປັນເຈົ້າຂອງໃນບ່ອນນັ້ນອີກ
ເປັນຜູ້ຈະເລີນຂຶ້ນແລ້ວເສື່ອມລົງ ຍ່ອມໝຸນໄປຕາມຄວາມຫິວກະຫາຍ
[໗໕໔] ນໍຣະຊົນຮູ້ເຖິງໂທດ
ເຊິ່ງເກີດມີດ້ວຍອຳນາດຄວາມເມົາໃນຄວາມເປັນໃຫຍ່ແນວນີ້ແລ້ວ
ລະຄວາມເມົາໃນຄວາມເປັນໃຫຍ່ໄດ້ແລ້ວ ເພິ່ງໄປສະຫວັນໄດ້
ເຂົາມີປັນຍາເມື່ອຕາຍໄປຍ່ອມເຂົ້າເຖິງສະຫວັນ

**ກຸມາຣະເປຕະວັດຖຸທີ ໒ ຈົບ**

## ໗. ຣາຊະປຸດຕະເປຕະວັດຖຸ
## ເລື້ອງເຜດຣາດຊະບຸດ

(ພຣະສາດສະດາຕັດວ່າ)

[໗໕໓] ຜົນກຳທັງຫຼາຍທີ່ພຣະຣາດຊະໂອຣົດເຮັດໄວ້ໃນຊາດກ່ອນເພິ່ງຢ່ຳຍີຈິດໃຈ
ຍ້ອນຮູບ ສຽງ ກິ່ນ ຣົດ ແລະໂຜດຖັບພະທີ່ໜ້າອອນຊອນໃຈ

[໗໕໔] ພຣະຣາດຊະໂອຣົດຈຶ່ງໄດ້ສະເຫວີຍການຟ້ອນລຳ ຂັບຮ້ອງ ຄວາມຍິນດີ
ແລະຄວາມສະໜຸກສະໜານຫຼວງຫຼາຍ
ຊຶ່ງໄດ້ຮັບການບຳລຸງປິ່ນເປີໃນພຣະຣາດຊະອຸທະຍານແລ້ວ
ຈຶ່ງສະເດັດເຂົ້າໄປສູ່ພູຄີຣີບພະຊະ

[໗໕໕] ໄດ້ຊຶ່ງທອດພຣະເນດເຫັນພຣະປັດເຈກພຸດທະນາມວ່າ ສຸເນດ
ຜູ້ສະແຫວງຫາຄຸນອັນປະເສີດ ເຝິກຝົນຕົນແລ້ວ
ມີຈິດຕັ້ງໝັ້ນ ປາຖະໜາໜ້ອຍ
ສົມບູນດ້ວຍທີຣິ ຍິນດີສະເພາະອາຫານທີ່ຢູ່ໃນບາດເຊິ່ງໄດ້ມາດ້ວຍພິກຂາຈານ

[໗໕໖] ຈຶ່ງສະເດັດລົງຈາກຄໍຊ້າງແລ້ວໄດ້ຕັດຖາມວ່າ
ໄດ້ພິກສາແດ່ບໍ ພຣະຜູ້ເປັນເຈົ້າ
ຖືໂຕວ່າເປັນກະສັດ
ຊຶ່ງຈັບບາດຂອງພຣະປັດເຈກພຸດທະນັ້ນຊູຂຶ້ນ

[໗໕໗] ແລ້ວຖິ້ມທຳລາຍບາດທີ່ພື້ນດິນແຂງ
ຊຶ່ງພຣະສະຣອນ ຫຼີກໄປ(ໜ້ອຍໜຶ່ງ)ແລ້ວຕັດວ່າ
ເຮົາເປັນພຣະຣາດຊະໂອຣົດຂອງພຣະເຈົ້າກິຕະວະ
ທ່ານຈັກເຮັດຫຍັງເຮົາໄດ້
[໗໕໘] ກຳຫຍາບຊ້າມີຜົນເຜັດຮ້ອນ
ເຊິ່ງພຣະຣາດຊະໂອຣົດຜູ້ແອອັດຢູ່ໃນນະຮົກສະເຫວີຍແລ້ວ

[໗໕໙] ພຣະຣາດຊະໂອຣົດເຮັດບາບຫຍາບຊ້າໄວ້
ຈຶ່ງໄດ້ປະສົບທຸກແສນສາຫັດຢູ່ໃນນະຮົກ ໘໔໐,໐໐໐ ປີ ລວມ ໖ ຄັ້ງ

[໗໖໐] ທ່ານເປັນຄົນພານ
ນອນຫງາຍແດ່ ຂວ້ຳແດ່
ນອນຕະແຄງຊ້າຍ ຕະແຄງຂວາແດ່
ຊີ້ຕີນຂຶ້ນຂ້າງເທິງແດ່ ຢືນຢູ່ແດ່
ມີກໄໝ້ຢູ່ສິ້ນການລະນານ (ຂ້າງລະ ໘໔໐,໐໐໐ ປີ)

[໗໖໑] ທ່ານເຮັດບາບຫຍາບຊ້າໄວ້
ຈຶ່ງປະສົບທຸກແສນສາຫັດຢູ່ໃນນະຮົກຫຼາຍພັນ ຫຼາຍໝື່ນປີ

[໑໓໔] ບຸກຄົນຜູ້ມີການກະທຳອັນເປັນບາບ
ພາກັນທຳລາຍລືສີຜູ້ບໍ່ປະທຸດສະຮ້າຍຕໍ່ຜູ້ປະທຸດສະຮ້າຍ
ຜູ້ມີຂໍ້ປະຕິບັດດີງາມ ຈຶ່ງໄດ້ສະເຫວີຍທຸກເຜັດຮ້ອນຢ່າງຍິ່ງແບບນີ້
[໑໓໓] ເຜດຜູ້ເປັນຮາດຊະບຸດນັ້ນສະເຫວີຍທຸກຫຼວງຫຼາຍໃນນະຮົກຫຼາຍແສນປີ
ຈຸຕິຈາກນະຮົກແລ້ວມາເກີດເປັນເຜດຊື່ຊຸບປິປາສະຫະຕະ[๑]
[໑໓໔] ນໍຣະຊິນຮູ້ເຖິງໂທດ
ເຊິ່ງເກີດມີດ້ວຍອຳນາດຄວາມເມົາໃນຄວາມເປັນໃຫຍ່ແບບນີ້ແລ້ວ
ເພິ່ງລະຄວາມເມົາໃນຄວາມເປັນໃຫຍ່ສາ
ແລ້ວປະພຶດອ່ອນນ້ອມຖ່ອມຕົນຢູ່ສະເໝີ
[໑໓໕] ຜູ້ມີປັນຍາ ມີຄວາມເຄົາລົບໃນພຣະພຸດທະເຈົ້າ
ພຣະທຳ ແລະພຣະສົງ
ເປັນຜູ້ຄວນແກ່ການສັນເສີນໃນປັດຈຸບັນນີ້ແລ້ວ
ເມື່ອຕາຍໄປຍ່ອມເຂົ້າເຖິງສະຫວັນ

**ຮາຊະປຸດຕະເປຕະວັດຖຸທີ ໑ ຈົບ**

## ໗. ຄູຖະຂາທະກະເປຕະວັດຖຸ
## ເລື້ອງເຜດກິນຄູດ

(ພຣະມະຫາໂມກຄັນລານະເຖຣະຖາມເຜດຕົນໜຶ່ງວ່າ)

[໑໓໖] ທ່ານເປັນໃຜນໍ ໂປ່ໂລ່ຂຶ້ນຈາກຂຸມຄູດ ຢືນໂສກເສົ້າຢູ່
ທ່ານຄົງເຮັດກຳຊົ່ວໄວ້ໂດຍບໍ່ຕ້ອງສົງໄສ
ຈະຮ້ອງຄວນຄາງອື້ອຶງໄປເຮັດຫຍັງນໍ

(ເຜດນັ້ນຕອບວ່າ)

[໑໓໗] ພຣະຜູ້ເປັນເຈົ້າຜູ້ຈະເລີນ ຂ້ານ້ອຍເກີດເປັນເຜດໃນຍົມມະໂລກ
ໄດ້ຮັບຄວາມລຳບາກ ຍ້ອນເຮັດກຳຊົ່ວໄວ້
ຈຶ່ງຕ້ອງຈາກໂລກນີ້ໄປສູ່ເປຕະໂລກ
(ພຣະມະຫາໂມກຄັນລານະເຖຣະຖາມວ່າ)

[໑໓໘] ທ່ານໄດ້ເຮັດກຳຊົ່ວທາງກາຍ ວາຈາ ໃຈອັນໃດໄວ້ນໍ
ຍ້ອນຜົນກຳອັນໃດທ່ານຈຶ່ງໄດ້ຮັບທຸກແບບນີ້

(ເຜດນັ້ນຕອບວ່າ)

[໑໙໙] ໄດ້ມີພິກຂຸອົງໜຶ່ງຢູ່ປະຈຳໃນວັດຂອງຂ້ານ້ອຍ
ມັກອິດສະຫຍາ ຂີ້ຖີ່ຕະກູນ ຜູກຂາດໃນເຮືອນຂອງຂ້ານ້ອຍ
ມີໃຈກະດ້າງ ມັກດ່າວ່າ(ພິກຂຸອາຄັນຕຸກະທັງຫຼາຍ)

[໑໑໐] ຂ້ານ້ອຍເຊື່ອຄຳຂອງທ່ານ ໄດ້ດ່າວ່າພິກຂຸທັງຫຼາຍ
ຍ້ອນຜົນກຳນັ້ນ ຂ້ານ້ອຍຈຶ່ງຕ້ອງຈາກໂລກນີ້ໄປສູ່ເປຕະໂລກ

(ພຣະມະຫາໂມກຄັນລານະເຖຣະຖາມວ່າ)

[໑໑໑] ພິກຂຸຜູ້ຄຸ້ນເຄີຍກັບຕະກູນຂອງທ່ານບໍ່ແມ່ນມິດແທ້ ເປັນມິດຫຼຽມ
ມີປັນຍາຊາມ ມໍຣະນະພາບແລ້ວໄປສູ່ຄະຕິໃດນໍ

(ເຜດນັ້ນຕອບວ່າ)

[໑໑໔] ຂ້ານ້ອຍຢືນຢູ່ເທິງຂະໝ່ອມຫົວຂອງເຜດ
ເຊິ່ງເຄີຍເປັນພິກຂຸຜູ້ເຮັດກຳຊົ່ວນັ້ນແລ
ແລະພິກຂຸນັ້ນໄປເກີດເປັນເຜດຜູ້ປົນນິບັດຂອງຂ້ານ້ອຍເອງ

[໑໑໕] ພຣະຜູ້ເປັນເຈົ້າຜູ້ຈະເລີນ ຊົນເຫຼົ່າອື່ນຖ່າຍສິ່ງໃດລົງໄປ
ສິ່ງນັ້ນເປັນອາຫານຂອງຂ້ານ້ອຍ ແລະຂ້ານ້ອຍເອງຖ່າຍສິ່ງໃດລົງໄປ
ເຜດເຊິ່ງເຄີຍເປັນພິກຂຸນັ້ນກໍອາໄສສິ່ງນັ້ນລ້ຽງຊີບ

**ຄູຖະຂາທະກະເປຕະວັດຖຸທີ ໗ ຈົບ**

## ໘. ຄູຖະຂາທະກະເປຕິວັດຖຸ

## ເລື້ອງນາງເຜດກິນຄູດ

(ພຣະມະຫາໂມກຄັນລານະເຖຣະຖາມນາງເຜດຕົນໜຶ່ງວ່າ)

[໑໑໔] ທ່ານເປັນໃຜນໍ ໂປ່ໂລ່ຂຶ້ນຈາກຂຸມຄູດ ຢືນໂສກເສົ້າຢູ່
ທ່ານຄົງເຮັດກຳຊົ່ວໄວ້ໂດຍບໍ່ຕ້ອງສົງໄສ
ຈະຮ້ອງຄວນຄາງອື້ອຶງໄປເຮັດຫຍັງນໍ

(ນາງເຜດນັ້ນຕອບວ່າ)

[໑໗໕] ພຣະຜູ້ເປັນເຈົ້າຜູ້ຈະເລີນ ເຮົາເກີດເປັນເຜດໃນຍົມມະໂລກ
ໄດ້ຮັບຄວາມລຳບາກ ຍ້ອນເຮັດກຳຊົ່ວໄວ້
ຈຶ່ງຕ້ອງຈາກໂລກນີ້ໄປສູ່ເປຕະໂລກ

(ພຣະມະຫາໂມກຄັນລານະເຖຣະຖາມວ່າ)

[໑໗໖] ທ່ານໄດ້ເຮັດກຳຊົ່ວທາງກາຍ ວາຈາ ໃຈອັນໃດໄວ້ນໍ
ຍ້ອນຜົນກຳອັນໃດ ທ່ານຈຶ່ງໄດ້ຮັບທຸກແນວນີ້
(ນາງເຜດນັ້ນຕອບວ່າ)

[໑໗໗] ໄດ້ມີພິກຂຸອົງໜຶ່ງຢູ່ປະຈຳໃນວັດຂອງຂ້ານ້ອຍ
ມັກອິດສະຫຍາ ຂີ້ຖີ່ຕະກູນ ຜູກຂາດໃນເຮືອນຂອງຂ້ານ້ອຍ
ມີໃຈກະດ້າງ ມັກດ່າວ່າ(ພິກຂຸອາຄັນຕຸກະທັງຫຼາຍ)

[໑໗໘] ຂ້ານ້ອຍເຊື່ອຄຳຂອງທ່ານ ໄດ້ດ່າວ່າພິກຂຸທັງຫຼາຍ
ຍ້ອນຜົນກຳນັ້ນຂ້ານ້ອຍຈຶ່ງຕ້ອງຈາກໂລກນີ້ໄປສູ່ເປຕະໂລກ

(ພຣະມະຫາໂມກຄັນລານະເຖຣະຖາມວ່າ)

[໑໗໙] ພິກຂຸຜູ້ຄຸ້ນເຄີຍກັບຕະກູນຂອງທ່ານບໍ່ແມ່ນມິດແທ້ ເປັນມິດທຽມ
ມີປັນຍາຊາມ ມໍຣະນະພາບແລ້ວໄປສູ່ຄະຕິໃດນໍ

(ນາງເຜດນັ້ນຕອບວ່າ)

[໑໘໐] ຂ້ານ້ອຍຢືນຢູ່ເທິງຂະໝ່ອມຫົວຂອງເຜດ
ເຊິ່ງເຄີຍເປັນພິກຂຸຜູ້ເຮັດກຳຊົ່ວນັ້ນແລ
ແລະພິກຂຸນັ້ນໄປເກີດເປັນເຜດຜູ້ປົນນິບັດຂອງຂ້ານ້ອຍເອງ

[໑໘໑] ພຣະຜູ້ເປັນເຈົ້າຜູ້ຈະເລີນ ຊົນເຫຼົ່າອື່ນຖ່າຍສິ່ງໃດລົງໄປ
ສິ່ງນັ້ນເປັນອາຫານຂອງຂ້ານ້ອຍ
ແລະຂ້ານ້ອຍເອງຖ່າຍສິ່ງໃດລົງໄປ
ເຜດເຊິ່ງເຄີຍເປັນພິກຂຸນັ້ນກໍອາໄສສິ່ງນັ້ນລ້ຽງຊີບ

**ຄູຖະຂາທະກະເປຕິວັດຖຸທີ ໗ ຈົບ**

# ໑໐. ຄະນະເປຕະວັດຖຸ

## ເລື່ອງເຜດຄະນະໜຶ່ງ

(ພຣະມະຫາໂມກຄັນລານະເຖຣະຖາມເຜດທັງຫຼາຍວ່າ)

[໗໘໔] ພວກທ່ານເປືອຍກາຍ ມີຮ່າງກາຍຜ່າຍຜອມ
ມີຜິວພັນແລະຮູບຮ່າງໜ້າກຽດຊັງເປັນຕາຢ້ານ ຈ່ອຍແຫ້ງ
ມີຮ່າງກາຍສະພັ່ງໄປດ້ວຍເສັ້ນເອັນ ມີກະດູກຂ້າງສຽບຂຶ້ນ
ທ່ານຜູ້ນິຣະທຸກ ພວກທ່ານເປືອຍກາຍເປັນໃຜກັນນໍ

(ເຜດທັງຫຼາຍຕອບວ່າ)

[໗໘໕] ພຣະຜູ້ເປັນເຈົ້າຜູ້ຈະເລີນ ພວກຂ້ານ້ອຍເປັນເຜດຕົກຍາກ
ເກີດໃນຍົມມະໂລກ ຍ້ອນເຮັດກຳຊົ່ວໄວ້
ຈຶ່ງຕ້ອງຈາກໂລກນີ້ໄປສູ່ເປຕະໂລກ

(ພຣະມະຫາໂມກຄັນລານະເຖຣະຖາມວ່າ)

[໗໘໖] ພວກທ່ານໄດ້ເຮັດກຳຊົ່ວທາງກາຍ ວາຈາ ໃຈອັນໃດໄວ້ນໍ
ຍ້ອນຜົນກຳອັນໃດທ່ານທັງຫຼາຍຈຶ່ງຕ້ອງຈາກໂລກນີ້ໄປສູ່ເປຕະໂລກ

(ເຜດເຫຼົ່ານັ້ນຕອບວ່າ)

[໗໘໗] ເມື່ອສະມະນະພາມທັງຫຼາຍ
ຜູ້ເປັນຄືທ່ານ້ຳເຊິ່ງບໍ່ມີໃຜຫວງຫ້າມ
ພວກຂ້ານ້ອຍ(ມີຄວາມຂີ້ຖີ່)ຈຶ່ງເກັບຊັບພຽງເຄິ່ງມາສົກໄວ້
ເມື່ອວັດຖຸທານມີຢູ່ກໍບໍ່ໄດ້ເຮັດທີ່ເພິ່ງແກ່ຕົນ (ໃຫ້ທານ)
[໗໘໘] ພວກຂ້ານ້ອຍຫິວນ້ຳ ຈຶ່ງເຂົ້າໄປໃກ້ແມ່ນ້ຳ
ແມ່ນ້ຳກັບກາຍເປັນສິ່ງວ່າງເປົ່າໄປ
ໃນເວລາຮ້ອນ ພວກຂ້ານ້ອຍເຂົ້າໄປໃກ້ຮົ່ມໄມ້
ຮົ່ມໄມ້ກັບກາຍເປັນແດດໄປ
[໗໘໙] ທັງລົມກໍຮ້ອນຄືໄຟ ພັດຟຸ້ງເຜົາພວກຂ້ານ້ອຍໄປ
ພຣະຜູ້ເປັນເຈົ້າຜູ້ຈະເລີນ ພວກຂ້ານ້ອຍສົມຄວນສະເຫວີຍທຸກອັນມີຄວາມ
ຢາກເປັນຕົ້ນນີ້ ແລະທຸກແນວອື່ນທີ່ໜັກກວ່ານັ້ນ

[໗໗໗]	ອັນໜຶ່ງພວກຂ້ານ້ອຍຫິວໂຫຍ ຢາກອາຫານ
ພາກັນເດີນທາງໄປຫຼາຍໂຍດ
ກໍບໍ່ໄດ້ອາຫານເລີຍ ຈຶ່ງພາກັນກັບມາ
ພວກຂ້ານ້ອຍຊ່າງມີບຸນໜ້ອຍເອົາແທ້ນໍ

[໗໗໙]	ພຣະຜູ້ເປັນເຈົ້າຜູ້ຈະເລີນ ພວກຂ້ານ້ອຍຫິວໂຫຍເມື່ອຍລ່າ
ເປັນລົມລົ້ມສະຫຼົບລົງທີ່ພື້ນດິນ ບາງເທື່ອລົ້ມຫງາຍກິ້ງໄປ
ບາງເທື່ອກໍລົ້ມຂວ້ຳ

[໗໙໐]	ອັນໜຶ່ງພວກຂ້ານ້ອຍນັ້ນສະຫຼົບລົ້ມຢູ່ທີ່ພື້ນດິນນັ້ນເອງ
ໜ້າເອິກແລະຫົວກໍກະທົບກັນແລະກັນ
ພວກຂ້ານ້ອຍຊ່າງມີບຸນໜ້ອຍເອົາແທ້ນໍ

[໗໙໑]	ພຣະຜູ້ເປັນເຈົ້າຜູ້ຈະເລີນ ພວກຂ້ານ້ອຍຄວນຈະສະເຫວີຍທຸກ
ມີຄວາມຢາກເປັນຕົ້ນນີ້ ແລະທຸກແນວອື່ນທີ່ໜັກກວ່ານັ້ນ
ຍ້ອນເມື່ອວັດຖຸທານມີຢູ່ ກໍບໍ່ໄດ້ເຮັດທີ່ເພິ່ງແກ່ຕົນ

[໗໙໔]	ອັນໜຶ່ງ ພວກຂ້ານ້ອຍນັ້ນຈາກເປຕະໂລກນີ້ໄປແລ້ວ
ໄດ້ກຳເນີດເປັນມະນຸດ
ຈັກຮູ້ຄວາມປະສົງຂອງຜູ້ຂໍ ສົມບູນດ້ວຍສິນ
ແລະເຮັດກຸສົນໃຫ້ຫຼາຍເປັນແນ່

**ຄະນະເປຕະວັດຖຸທີ ໑໐ ຈົບ**

# ໑໑. ປາຕະລິປຸດຕະເປຕະວັດຖຸ

## ເລື້ອງຍິງຊາວເມືອງປາຕະລີບຸດສົນທະນາກັບເຜດ

(ເວມານິກະເຜດຕົນໜຶ່ງໄດ້ກ່າວກັບຍິງມະນຸດຄົນໜຶ່ງວ່າ)

[໗໙໕]	ສັດນະຮົກລາງພວກ ກຳເນີດສັດເດຍຣັດສານ ເຜດ ອະສຸຣະກາຍ
ຫຼືແມ່ນມະນຸດ ແລະເທວະດາທ່ານກໍໄດ້ເຫັນແລ້ວ
ຜົນກຳຂອງຕົນທ່ານກໍໄດ້ເຫັນດ້ວຍຕົນເອງ
ເຮົາຈັກນຳທ່ານໄປສົ່ງຍັງເມືອງປາຕະລີບຸດເຊິ່ງບໍ່ມີໃຜຫວງຫ້າມ
ທ່ານໄປທີ່ເມືອງນັ້ນແລ້ວຈຶ່ງເຮັດກຸສົນກຳເທີ້ນ

(ເມື່ອຍິງນັ້ນໄດ້ຟັງແລ້ວ ມີຄວາມພໍໃຈ ຈຶ່ງກ່າວຕອບວ່າ)

[໑໙໔] ເທວະດາຜູ້ຄວນບູຊາ ທ່ານເປັນຜູ້ມຸ້ງປະໂຫຍດເກື້ອກູນແກ່ເຮົາ
ເຮົາຈະເຮັດຕາມຄຳຂອງທ່ານ
ທ່ານເປັນອາຈານຂອງເຮົາ

[໑໙໕] ສັດນະຮົກລາງພວກ ກໍາເນີດສັດເດຍຣັດສານ ເຜດ ອະສຸຣະກາຍ
ຫຼືແມ່ນມະນຸດ ແລະເທວະດາເຮົາກໍໄດ້ເຫັນແລ້ວ
ຜົນກຳຂອງຕົນເຮົາກໍໄດ້ເຫັນເອງແລ້ວ
ເຮົາຈະເຮັດບຸນໃຫ້ຫຼາຍ

**ປາຕະລີປຸດຕະເປຕະວັດຖຸທີ ໑໑ ຈົບ**

## ໑໔. ອຳພະວະນະເປຕະວັດຖຸ

## ເລື່ອງເຜດເຝົ້າສວນໝາກມ່ວງ

(ພວກພໍ່ຄ້າໄດ້ຖາມເວມານິກະເຜດຕົນໜຶ່ງວ່າ)

[໑໙໖] ສະໂບກຂະຣະນີຂອງທ່ານນີ້ແສນຈະໜ້າອອນຊອນ
ມີພື້ນຮາບພຽງ ມີທ່ານ້ຳງົດງາມ ມີນ້ຳຫຼາຍ
ມີດອກໄມ້ບານເດຍລະດາດ ຂວັກໄຂວ່ດ້ວຍໝູ່ພະມອນ
ທ່ານໄດ້ສະໂບກຂະຣະນີເປັນທີ່ຈະເລີນໃຈນີ້ມາແນວໃດ

[໑໙໗] ສວນໝາກມ່ວງຂອງທ່ານນີ້ແສນຈະໜ້າອອນຊອນ
ກຳລັງເປັນໝາກ ມີດອກບານສະພັ່ງ ຂວັກໄຂວ່ໄປດ້ວຍໝູ່ພະມອນ
ນຳຄວາມສຸກມາໃຫ້ ທຸກລະດູ
ທ່ານໄດ້ວິມານນີ້ມາແນວໃດ

(ເວມານິກະເຜດນັ້ນຕອບວ່າ)

[໑໙໘] ເຮົາໄດ້ສວນໝາກມ່ວງມີຮົ່ມເງົາເຢັນໜ້າອອນຊອນໃຈໃນບ່ອນນີ້
ຍ້ອນທານທີ່ທິດາຂອງເຮົາຖວາຍໝາກມ່ວງສຸກ
ນ້ຳ ເຂົ້າຍາຄູ (ເຂົ້າຕົ້ມ) ແລ້ວອຸທິດໃຫ້

(ທິດາຂອງເຜດນັ້ນບອກລູກຂອງຕົນເອງວ່າ)

[໗໙໙] ຂໍລູກຈົ່ງເບິ່ງຜົນແຫ່ງທານ ຄວາມຂົ່ມໃຈ
ແລະຄວາມສັງລວມທີ່ເຫັນຜົນທັນຕາແນວນີ້
ແມ່ເປັນສາວໃຊ້ ມາເປັນລູກໃພ້ເປັນໃຫຍ່ໃນເຮືອນໃນຕະກູນຂອງລູກ

(ພາຍຫຼັງມື້ໜຶ່ງ ພຣະສາດສະດາຊົງເຫັນນາງມີຍານແກ່ກ້າ ຈຶ່ງແຜ່ຣັດສະໝີໄປສະແດງພຣະອົງໃຫ້ຜາກົດຄືປະທັບຢືນຢູ່ສະເພາະໜ້າ ແລ້ວໄດ້ຕັດຄາຖານີ້ວ່າ)

ສິ່ງທີ່ບໍ່ໜ້າພໍໃຈຍ່ອມຄອບງຳຜູ້ຜະໝາດໂດຍອາການທີ່ໜ້າພໍໃຈ
ສິ່ງທີ່ບໍ່ໜ້າຮັກຍ່ອມຄອບງຳຜູ້ຜະໝາດໂດຍອາການທີ່ໜ້າຮັກ
ແລະສິ່ງທີ່ເປັນທຸກຍ່ອມຄອບງຳຜູ້ຜະໝາດໄດ້ໂດຍອາການທີ່ເປັນສຸກ

**ອຳພະວະນະເປຕະວັດຖຸທີ ໑໔ ຈົບ**

# ໑໕. ອັກຂະຣຸກະຂະເປຕະວັດຖຸ

## ເລື້ອງອັກຂະຣຸກະຂະເຜດ

(ພຸມເທວະດາຕົນໜຶ່ງເຕືອນອຸປາສົກຄົນໜຶ່ງວ່າ)

[໗໐໐] ທາຍົກໃຫ້ສິ່ງໃດ ຜົນຈະເປັນສິ່ງນັ້ນກໍບໍ່ມີ
ຍ້ອນແນວນັ້ນບຸກຄົນເພິ່ງໃຫ້ທານເທີ້ນ
ເມື່ອໃຫ້ທານແລ້ວ ຍ່ອມຂ້າມພົ້ນທຸກແລະຄວາມພິນາດທັງສອງ
ຍ່ອມປະສົບສຸກທັງສອງ[1] ຍ້ອນທານນັ້ນ
ທ່ານຈົ່ງຕື່ນເທີ້ນ ຢ່າໄດ້ຜະໝາດເລີຍ

**ອັກຂະຣຸກຂະເປຕະວັດຖຸທີ ໑໕ ຈົບ**

# ໑໖. ໂພຄະສັງຫະຣະເປຕະວັດຖຸ

## ເລື້ອງເຜດຮິບໂຮມໂພຄະ

(ເວລາກາງຄືນ ຍິງເຜດ ໔ ຕົນ ຖືກທຸກຄອບງຳ ຈຶ່ງພາກັນຮ້ອງໄຫ້ຮ່ຳໄຮລຳພັນ ດ້ວຍສຽງດັງອັນເປັນຕາຢ້ານວ່າ)

[໗໐໑] ພວກເຮົາຮິບໂຮມໂພຄະຊັບໄວ້ໂດຍຖືກຕ້ອງຕາມທຳແດ່
ບໍ່ຖືກຕ້ອງຕາມທຳແດ່

ແຕ່ຄົນອື່ນ ໆ ພາກັນໃຊ້ສອຍໂພຄະຊັບເຫຼົ່ານັ້ນ
ພວກເຮົາກັບໄດ້ຮັບທຸກ ໌

**ໂພຄະສັງຫະຣະເປຕະວັດຖຸທີ ໑໔ ຈົບ**

## ໑໕. ເສດຖີປຸດຕະເປຕະວັດຖຸ
## ເລື້ອງເຜດເສດຖີບຸດ

(ພຣະຜູ້ມີພຣະພາກເຈົ້າໄດ້ຕັດພຣະຄາຖາທີ່ເຜດ ໔ ຕົນເລີ່ມຈະກ່າວຕົນລະຄາຖາໃຫ້ບໍລິບູນວ່າ)

[໗໐໔] ເມື່ອພວກເຮົາມີກໄໝ້ຢູ່ໃນນະຣົກ ໖ ໝື່ນປີຄົບຖ້ວນບໍລິບູນ
ເມື່ອໃດຈັກມີຄວາມສິ້ນສຸດ

[໗໐໓] ຄວາມສິ້ນສຸດບໍ່ມີ ຄວາມສິ້ນສຸດຈະມີຢູ່ໃສ
ຄວາມສິ້ນສຸດຈັກບໍ່ຜາກົດ
ສະຫາຍຜູ້ຮ່ວມທຸກ ຍ້ອນເຮົາແລະທ່ານໄດ້ເຮັດກຳຊົ່ວໄວ້ແນວນັ້ນ

[໗໐໔] ພວກເຮົາ ເມື່ອວັດຖຸທານມີຢູ່ ບໍ່ໃຫ້ຂອງທີ່ມີຢູ່
ຈຶ່ງມີຊີວິດເປັນຢູ່ຢ່າງລຳບາກ
ເມື່ອວັດຖຸທານມີຢູ່ ພວກເຮົາບໍ່ໄດ້ເຮັດທີ່ເພິ່ງແກ່ຕົນ

[໗໐໕] ເຮົານັ້ນຈາກເປຕະໂລກນີ້ໄປແລ້ວ ໄດ້ເກີດເປັນມະນຸດ
ຈັກຮູ້ຄວາມປະສົງຂອງຜູ້ຂໍ ສົມບູນດ້ວຍສິນ
ເຮັດກຸສົນໃຫ້ຫຼາຍເປັນແນ່

**ເສດຖີປຸດຕະເປຕະວັດຖຸທີ ໑໕ ຈົບ**

## ໑໖. ສັດຖິກູຕະເປຕະວັດຖຸ
## ເລື້ອງເຜດຖືກຄ້ອນຕີຫົວ

(ມື້ໜຶ່ງ ພຣະມະຫາໂມກຄັນລານະເຖຣະ ລົງຈາກພູຄິດຊະກູດ ໄດ້ເຫັນເຜດຕົນໜຶ່ງ ຈຶ່ງໄຕ່ຖາມດ້ວຍຄາຖາວ່າ)

[໗໐໖] ເຈົ້າເປັນບ້າໄປແລ້ວບໍ ຈຶ່ງແລ່ນໄປມາຄືເນື້ອທີ່ແລ່ນພ່ານ
ທ່ານຄົງເຮັດກຳຊົ່ວໄວ້ໂດຍບໍ່ຕ້ອງສົງໄສ
ຈະມາຮ້ອງຄວນຄາງອື້ອຶງໄປເຮັດຫຍັງນໍ

(ເຜດນັ້ນຕອບວ່າ)

[໗໐໗] ພຣະຜູ້ເປັນເຈົ້າຜູ້ຈະເລີນ ຂ້ານ້ອຍເກີດເປັນເຜດໃນຍົມມະໂລກ
ໄດ້ຮັບຄວາມລໍາບາກ ຍ້ອນເຮັດບາບກໍາໄວ້
ຈຶ່ງຕ້ອງຈາກໂລກນີ້ໄປສູ່ເປຕະໂລກ

[໗໐໘] ຄ້ອນເຫຼັກຈໍານວນ ໖໐,໐໐໐ ອັນ
ຕົກມາຕີຂະໝ່ອມຫົວຂອງຂ້ານ້ອຍ

(ພຣະເຖຣະຖາມວ່າ)

[໗໐໙] ທ່ານໄດ້ເຮັດກໍາຊົ່ວທາງກາຍ ວາຈາ ໃຈອັນໃດໄວ້ນໍ
ຍ້ອນຜົນກໍາອັນໃດທ່ານຈຶ່ງຕ້ອງໄດ້ຮັບທຸກແນວນີ້

[໗໑໐] ອັນໜຶ່ງ ຄ້ອນເຫຼັກຈໍານວນ ໖໐,໐໐໐ ອັນ
ຕົກມາຕີຂະໝ່ອມຫົວຂອງທ່ານ ຍ້ອນຜົນກໍາອັນໃດ

(ເຜດນັ້ນຕອບວ່າ)

[໗໑໑] ຄັ້ງນັ້ນຂ້ານ້ອຍໄດ້ເຫັນພຣະປັດເຈກພຸດທະເຈົ້າອົງໜຶ່ງນາມວ່າສຸເນດ
ອົບຮົມອິນຊີແລ້ວ ຜູ້ບໍ່ເກີດຄວາມຢ້ານແຕ່ບ່ອນໃດ
ນັ່ງເຂົ້າຊານຢູ່ທີ່ເຫງົ້າຕົ້ນໄມ້

[໗໑໒] ຂ້ານ້ອຍໄດ້ດີດກ້ອນຫີນ ທໍາລາຍຂະໝ່ອມຂອງທ່ານ
ຍ້ອນຜົນກໍານັ້ນ ຂ້ານ້ອຍຈຶ່ງຕ້ອງໄດ້ຮັບທຸກແນວນີ້

[໗໑໓] ຄ້ອນເຫຼັກຈໍານວນ ໖໐,໐໐໐ ອັນ
ຕົກມາຕີຂະໝ່ອມຫົວຂອງຂ້ານ້ອຍ

(ພຣະເຖຣະກ່າວວ່າ)

[໗໑໔] ບຸຣຸດຊົ່ວ ຍ້ອນຄວາມສາສົມແກ່ເຫດຂອງທ່ານ
ຄ້ອນເຫຼັກຈໍານວນ ໖໐,໐໐໐ ອັນ
ຈຶ່ງຕົກມາຕີຂະໝ່ອມຫົວຂອງທ່ານ

**ສັດຖິກູຕະເປຕະວັດຖຸທີ ໑໖ ຈົບ**

**ມະຫາວັກທີ ໔ ຈົບ**

## ລວມເລື້ອງເຜດທີ່ມີໃນວັກນີ້ ຄື

໑. ອຳພະສັກຂະຣະເປຕະວັດຖຸ
໒. ເສຣີສະກະເປຕະວັດຖຸ
໓. ນັນທະກະເປຕະວັດຖຸ
໔. ເຣວະຕີເປຕະວັດຖຸ
໕. ອຸດສຸເປຕະວັດຖຸ
໖. ກຸມາຣະເປຕະວັດຖຸ
໗. ຣາຊະປຸດຕະເປຕະວັດຖຸ
໘. ຄູຖະຂາທະກະເປຕະວັດຖຸ
໙. ຄູຖະຂາທະກະເປຕີວັດຖຸ
໑໐. ຄະນະເປຕະວັດຖຸ
໑໑. ປາຕະລິປຸດຕະເປຕະວັດຖຸ
໑໒. ອຳພະວະນະເປຕະວັດຖຸ
໑໓. ອັກຂະຣຸກຂະເປຕະວັດຖຸ
໑໔. ໂພຄະສັງຫະຣະເປຕະວັດຖຸ
໑໕. ເສດຖິປຸດຕະເປຕະວັດຖຸ
໑໖. ສັດຖິກູຕະເປຕະວັດຖຸ

ລວມ ໑໖ ເລື້ອງ ທ່ານຈັດໄວ້ເປັນໜຶ່ງວັກ

## ລວມວັກທີ່ມີໃນເລື້ອງເຜດ ຄື

໑. ອຸຣະວັກ
໒. ອຸບພະຣິວັກ
໓. ຈູລະວັກ
໔. ມະຫາວັກ

ລວມ ໕໑ ເລື້ອງ ໔ ພານະວານ

ເປຕະວັດຖຸ ຈົບບໍລິບູນ

# ພຣະສູດຕັນຕະປິດົກ

## ຂຸດທະກະນິກາຍ ເຖຣະຄາຖາ

**ຂໍນອມນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ພຣະອົງນັ້ນ**

### ນິທານຄາຖາ

ເຊີນທ່ານທັງຫຼາຍ ສະດັບຄາຖາເຊິ່ງນຳເຂົ້າໄປຫາປະໂຫຍດ
ຂອງທ່ານຜູ້ອົບຮົມຕົນໄດ້ ຜູ້ເປັນເຊັ່ນຣາດຊະສີຫຍິ່ງແຂ້ວ
ຮ້ອງຄຳຣາມຢູ່ທີ່ຮ່ອມພູ

ທ່ານມີຊື່ ວົງຕະກູນ ມີທຳເປັນເຄື່ອງຢູ່
ແລະມີຈິດອັນນ້ອມໄປໃນທຳຕາມທີ່ຜາກົດ
ເປັນຜູ້ມີປັນຍາ ຢູ່ແບບບໍ່ຂີ້ຄ້ານ

ເຫັນແຈ່ມແຈ້ງ ບັນລຸນິບພານແລ້ວໃນເສນາສະນະອັນສະຫງັດນັ້ນ ໆ
ເມື່ອເລັງເຫັນຜົນອັນເລີດແຫ່ງໜ້າທີ່ທີ່ໄດ້ເຮັດສຳເລັດແລ້ວ
ຈຶ່ງໄດ້ກ່າວຂໍ້ຄວາມນີ້ໄວ້

## ໑. ເອກະນິບາດ

## ໑. ປະຖົມວັກ

### ໝວດທີ ໑

### ໑. ສຸພູຕິເຖຣະຄາຖາ

**ພາສິດຂອງພຣະສຸພູຕິເຖຣະ**

ຮູ້ວ່າ ທ່ານພຣະສຸພູຕິເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ ວ່າ

[໑] ຝົນເອີຍ ກຸດຕິຂອງເຮົາສະບາຍ ມຸງບັງມິດຊິດດີ
ຈົ່ງຕົກຕາມສະບາຍເທີ້ນ ຈິດເຮົາລຸດພົ້ນ ຕັ້ງໝັ້ນດີແລ້ວ
ເຮົາພາຣົບຄວາມພຽນຢູ່ ຈົ່ງຕົກລົງມາເທີ້ນຝົນ

# ໒. ມະຫາໂກດຖິຕະເຖຣະຄາຖາ
## ພາສິດຂອງພຣະມະຫາໂກດຖິຕະເຖຣະ

ຮູ້ວ່າ ທ່ານພຣະໂກດທິຕະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໒] ພິກຂຸສະງົບ ງົດເວັ້ນຈາກການເຮັດຊົ່ວ ເວົ້າດ້ວຍປັນຍາ ບໍ່ຟຸ້ງຊ່ານ
ຍ່ອມກຳຈັດບາບທຳທັງຫຼາຍໄດ້ຄືລົມພັດໃບໄມ້ໃຫ້ຕົກຫຼົ່ນລົງ

# ໓. ກັງຂາເຣວະຕະເຖຣະຄາຖາ
## ພາສິດຂອງພຣະກັງຂາເຣວະຕະເຖຣະ

ຮູ້ວ່າ ທ່ານພຣະກັງຂາເຣວະຕະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໓] ເຊີນທ່ານເບິ່ງພຣະປັນຍາຂອງພຣະຕະຖາຄົດເຈົ້າທັງຫຼາຍ
ຜູ້ປະທານແສງສະຫວ່າງແລະປະທານດວງຕາ໑
ຍ່ອມຊື່ວ່າຊົງກຳຈັດຄວາມສົງໄສ
ຂອງເຫຼົ່າເວໄນຍະສັດ ຜູ້ພາກັນມາເຝົ້າໄດ້
ຄືແສງໄຟທີ່ເຈີດຈ້າໃນເວລາຄ່ຳຄືນ

# ໔. ປຸນນະເຖຣະຄາຖາ
## ພາສິດຂອງພຣະປຸນນະເຖຣະ

ຮູ້ວ່າ ທ່ານພຣະປຸນນະມັນຕານີບຸດເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໔] ບຸກຄົນເພິ່ງສະມາຄົມກັບສັດຕະບຸຣຸດທັງຫຼາຍ
ຜູ້ມີປັນຍາຊີ້ແນະແຕ່ປະໂຫຍດຝ່າຍດຽວ
ຍ້ອນສັດຕະບຸຣຸດ ໒ ທັງຫຼາຍເປັນປາດ ບໍ່ຜະໝາດ
ເຫັນປະຈັກແຈ້ງດ້ວຍປັນຍາ ໄດ້ບັນລຸປະໂຫຍດອັນໃຫຍ່ຫຼວງ
ເລິກເຊິ່ງ ເຫັນໄດ້ຍາກ ລະອຽດແລະສຸຂຸມ

# ໕. ທັບພະເຖຣະຄາຖາ
## ພາສິດຂອງພຣະທັບພະເຖຣະ

ຮູ້ວ່າ ທ່ານພຣະທັບພະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໕]　　ພຣະທັບພະຜູ້ເຝິກໄດ້ຍາກ ຖືກພຣະສາດສະດາຜູ້ເຝິກຊົງເຝິກແລ້ວ
ເປັນຜູ້ສັນໂດດ[๑] ປາສະຈາກຄວາມສົງໄສ ຊະນະກິເລດໄດ້ແລ້ວ
ປາສະຈາກຄວາມຫວາດກົວ ມີຈິດຕັ້ງໝັ້ນ ດັບເຢັນແລ້ວ

## ໖. ສີຕະວະນິຍະເຖຣະຄາຖາ

### ພາສິດຂອງພຣະສີຕະວະນິຍະເຖຣະ

ຮູ້ວ່າ ທ່ານພຣະສີຕະວະນິຍະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໖]　　ພິກຂຸຜູ້ເຂົ້າໄປສູ່ປ່າສີຕະວັນແລ້ວ
ຍ່ອມເປັນຜູ້ໂດດດ່ຽວ ສັນໂດດ ມີຈິດຕັ້ງໝັ້ນ
ຊະນະກິເລດໄດ້ແລ້ວ ປາສະຈາກຄວາມຂົນຫົວລຸກ
ມີປັນຍາ ຈະເລີນກາຍະຄະຕາສະຕິ[๒]

## ໗. ພັນລິຍະເຖຣະຄາຖາ

### ພາສິດຂອງພຣະພັນລິຍະເຖຣະ

ຮູ້ວ່າ ທ່ານພຣະພັນລິຍະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໗]　　ຜູ້ທີ່ກຳຈັດເສນາພະຍາມັດຈຸຣາດ[๓]ໄດ້ ຄືກະແສນ້ຳໄຫຼຖ້ວມ
ພັດພັງທະລາຍຂົວໄມ້ອໍ້ເຊິ່ງບໍ່ມີກຳລັງຕ້ານທານ
ນັບວ່າເປັນຜູ້ຊະນະກິເລດ ປາສະຈາກຄວາມບໍ່ຫວາດກົວ
ເຝິກຕົນດີແລ້ວ ມີຈິດໝັ້ນຄົງ ດັບເຢັນແລ້ວ

## ໘. ວີຣະເຖຣະຄາຖາ

### ພາສິດຂອງພຣະວີຣະເຖຣະ

ຮູ້ວ່າ ທ່ານພຣະວີຣະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໘]　　ພຣະວີຣະເຖຣະຜູ້ເຝິກໄດ້ຍາກ ຖືກພຣະສາດສະດາຜູ້ເຝິກຊົງເຝິກແລ້ວ
ເປັນຜູ້ສັນໂດດ ປາສະຈາກຄວາມສົງໄສ ຊະນະກິເລດໄດ້ແລ້ວ
ປາສະຈາກຄວາມຂົນຫົວລຸກ ມີຈິດໝັ້ນຄົງ ດັບເຢັນແລ້ວ

# ໙. ປິລິນທະວັດສະເຖຣະຄາຖາ

## ພາສິດຂອງພຣະປິລິນທະວັດສະເຖຣະ

ຮູ້ວ່າ ທ່ານພຣະປິລິນທະວັດສະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໙] ການທີ່ເຮົາໄດ້ມາຍັງສຳນັກພຣະຜູ້ມີພຣະພາກເຈົ້ານີ້ເປັນການມາດີແລ້ວ
ບໍ່ຂາດປະໂຫຍດ ການທີ່ເຮົາໄດ້ຄິດໄວ້ວ່າ ຈະຟັງທຳໃນສຳນັກຂອງ
ພຣະຜູ້ມີພຣະພາກເຈົ້າແລ້ວບວດນີ້ເປັນຄວາມຄິດບໍ່ຊົ່ວເລີຍ
ຍ້ອນເມື່ອພຣະຜູ້ມີພຣະພາກເຈົ້າຊົງຈຳແນກທຳອັນປະເສີດທັງຫຼາຍ
ເຮົາໄດ້ບັນລຸທຳນັ້ນແລ້ວ

# ໑໐. ປຸນນະມາສະເຖຣະຄາຖາ

## ພາສິດຂອງພຣະປຸນນະມາດເຖຣະ

ຮູ້ວ່າ ທ່ານພຣະປຸນນະມາດເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໑໐] ຜູ້ທີ່ບັນລຸຄວາມຮູ້ສູງສຸດ[໑] ເປັນຜູ້ສະງົບລະງັບ ສັງລວມຕົນແລ້ວ
ບໍ່ຂ້ອງຕິດໃນທຳທັງຫຼາຍທັງປວງ
ຮູ້ຄວາມເກີດຂຶ້ນແລະຄວາມເສື່ອມໄປແຫ່ງໂລກ[໒]
ນັບວ່າໄດ້ກຳຈັດຄວາມເພ່ງເລັງຄືຕັນຫາໃນໂລກນີ້ແລະໂລກໜ້າໄດ້

**ປະຖົມວັກ ຈົບ**

## ລວມເລື້ອງພຣະເຖຣະທີ່ມີໃນວັກນີ້ ຄື

໑. ພຣະສຸພູຕິເຖຣະ
໒. ພຣະກັງຂາເຣວະຕະເຖຣະ
໓. ພຣະທັບພະບຸດເຖຣະ
໗. ພຣະພັນລິຍະເຖຣະ
໙. ພຣະປິລິນທະວັດສະເຖຣະ
໔. ພຣະມະຫາໂກດຖິຕະເຖຣະ
໕. ພຣະປຸນນະມັນຕານີບຸດເຖຣະ
໖. ພຣະສີຕະວະນິຍະເຖຣະ
໘. ພຣະວິຣະເຖຣະ
໑໐. ພຣະປຸນນະມາດເຖຣະ

# ໔. ທຸຕິຍະວັກ

## ໝວດທີ ໔

### ໑. ຈະລະວັດສະເຖຣະຄາຖາ

#### ພາສິດຂອງພຣະຈະລະວັດສະເຖຣະ

ຮູ້ວ່າ ທ່ານພຣະຈະລະວັດສະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໑໑] ພິກຂຸທີ່ຫຼາຍດ້ວຍຄວາມປາໂມດໃນທຳ
ອັນພຣະພຸດທະເຈົ້າຊົງປະກາດແລ້ວ
ເພິ່ງບັນລຸສັນຕະບົດ໑ອັນເປັນທຳເຂົ້າໄປສະງົບລະງັບສັງຂານ ເປັນສຸກ

### ໔. ມະຫາວັດສະເຖຣະຄາຖາ

#### ພາສິດຂອງພຣະມະຫາວັດສະເຖຣະ

ຮູ້ວ່າ ທ່ານພຣະມະຫາວັດສະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໑໔] ພິກຂຸມີພະລັງປັນຍາ ສົມບູນດ້ວຍສີນແລະຂໍ້ປະຕິບັດ
ມີຈິດຕັ້ງໝັ້ນ ຍິນດີໃນຊານ ມີສະຕິ
ສັນອາຫານພໍຢູ່ໄດ້ ປາສະຈາກຣາຄະ໔
ເພິ່ງຖ້າເວລາເປັນທີ່ດັບຂັນທະປະຣິນິບພານໃນພຣະສາດສະໜານີ້

### ໓. ວະນະວັດສະເຖຣະຄາຖາ

#### ພາສິດຂອງພຣະວະນະວັດສະເຖຣະ

ຮູ້ວ່າ ທ່ານພຣະວະນະວັດສະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໑໓] ພູຫີນຫຼາກຫຼາຍມີສີດັ່ງກ້ອນເຝືອຄົ້ມ ງາມເຮືອງຮອງ
ແຫຼ່ງນ້ຳເຢັນໃສສະອາດ ເດຍລະດາດດ້ວຍແມງເຕົ່າຄຳ໑
ຊ່າງຊວນໃຫ້ເຮົາອອນຊອນໃຈແທ້ ໆ

## ໔. ວະນະວັດສະເຖຣະສາມະເນຣະຄາຖາ

### ພາສິດຂອງສາມະເນນຂອງພຣະວະນະວັດສະເຖຣະ

ຮູ້ວ່າສາມະເນນຂອງທ່ານພຣະວະນະວັດສະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໑໔] ພຣະອຸປັດຊາໄດ້ກ່າວກັບເຮົາວ່າ
ສີວະກະ ເຮົາຈະໄປຈາກບ່ອນນີ້ ກາຍເຮົາຢູ່ເຮືອນ (ແຕ່)ໃຈເຮົາຢູ່ປ່າ
ແມ່ນລຸກບໍ່ໄຫວ ເຮົາກໍຈະໄປ ຜູ້ຮູ້ແຈ້ງຈະບໍ່ຂ້ອງຢູ່

## ໕. ກຸນທະທານະເຖຣະຄາຖາ

### ພາສິດຂອງພຣະກຸນດະທານເຖຣະ

ຮູ້ວ່າ ທ່ານພຣະກຸນດະທານເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໑໕] ພິກຂຸເພິ່ງຕັດສັງໂຍດເບື້ອງຕ່ຳ ໕ ເພິ່ງລະສັງໂຍດເບື້ອງສູງ ໕
ເພິ່ງຈະເລີນອິນຊີ ໕ ໃຫ້ຍິ່ງຂຶ້ນໄປ
ພິກຂຸຜູ້ກ້າວລ່ວງທຳເປັນເຄື່ອງຂ້ອງ[໑] ໕ ປະການໄດ້ແລ້ວ
ພຣະຜູ້ມີພຣະພາກເຈົ້າຕັດວ່າ ຂ້າມໂອຄະ[໒]ໄດ້ແລ້ວ

## ໖. ເພລັດຖະສີສະເຖຣະຄາຖາ

### ພາສິດຂອງພຣະເພລັດຖະສີສະເຖຣະ

ຮູ້ວ່າ ທ່ານພຣະເພລັດຖະສີສະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໑໖] ງົວອາຊາໄນ ຈະເລີນເຕັມທີ່ທຽມໄຖແລ້ວ
ຍ່ອມລາກໄຖໄປໄດ້ໂດຍບໍ່ລຳບາກ ສັນໃດ
ເຮົາເມື່ອໄດ້ຄວາມສຸກ ປາສະຈາກອາມິດ[໑]ເຈືອປົນແລ້ວ
ມື້ຄືນທັງຫຼາຍ ຍ່ອມຜ່ານພົ້ນເຮົາໄປໂດຍບໍ່ຍາກ ສັນນັ້ນ

## ໗. ທາສະກະເຖຣະຄາຖາ

### ພາສິດຂອງພຣະທາສະກະເຖຣະ

ຮູ້ວ່າ ທ່ານພຣະທາສະກະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໑໗] ເມື່ອໃດ ບຸກຄົນຜູ້ຖືກຄວາມງ່ວງເຫງົາຄອບງຳບໍຣິໂພກຫຼາຍ
ມັກແຕ່ນອນກິ້ງເກືອກໄປມາ
ເມື່ອນັ້ນ ເຂົາຍ່ອມມີປັນຍາເສື່ອຍຊາ ມັກເຂົ້າຫ້ອງເປັນອາຈິນ
ຄືໝູອ້ວນທີ່ເຂົາຂຸນດ້ວຍເສດອາຫານ (ນອນກິ້ງເກືອກໄປມາ)

## ໘. ສິງຄາລະເຖຣະຄາຖາ

### ພາສິດຂອງພຣະສິງຄາລະເຖຣະ

ຮູ້ວ່າ ທ່ານພຣະສິງຄາລະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໑໘] ພິກຂຸຢູ່ໃນປ່າເພສະກະລາວັນ ພິຈາລະນາແຜ່ນດິນຄືອັດຕະພາບນີ້
ດ້ວຍເຂົ້າໃຈວ່າ ເປັນກະດູກລ້ວນ ເປັນອາລົມ
ຍ່ອມຊື່ວ່າເປັນທາຍາດຂອງພຣະພຸດທະເຈົ້າ
ເຮົາເຂົ້າໃຈວ່າ ທ່ານອົງນັ້ນເຫັນຈະລະກາມຣາຄະໄດ້ທັນທີແນ່ແທ້

## ໙. ກຸລະເຖຣະຄາຖາ

### ພາສິດຂອງພຣະກຸລະເຖຣະ

ຮູ້ວ່າ ທ່ານພຣະກຸລະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໑໙] ພວກຄົນໄຂນ້ຳກໍເຮັດໜ້າທີ່ໄຂນ້ຳ
ພວກຊ່າງເຮັດສອນກໍດັດລູກສອນ
ພວກຊ່າງໄມ້ກໍຖາກໄມ້
ພວກມີຂໍ້ວັດປະຕິບັດດີກໍເຝິກຕົນ

## ໑໐. ອະຊິຕະເຖຣະຄາຖາ

### ພາສິດຂອງພຣະອະຊິຕະເຖຣະ

ຮູ້ວ່າ ທ່ານພຣະອະຊິຕະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໔໐] ເຮົາບໍ່ມີຄວາມຢ້ານຕາຍ
ບໍ່ມີຄວາມເຍື່ອໃຍໃນຊີວິດ

ເຮົາຈະເປັນຜູ້ມີສະຕິສຳປະຊັນຍະ
ລະຖິ້ມຮ່າງກາຍເຮົາໄປ

**ທຸຕິຍະວັກ ຈົບ**

## ລວມເລື້ອງພຣະເຖຣະທີ່ມີໃນວັກນີ້ ຄື



# ໓. ຕະຕິຍະວັກ

## ໝວດທີ ໓

## ໑. ນິໂຄທະເຖຣະຄາຖາ

### ພາສິດຂອງນິໂຄທະເຖຣະ

ຮູ້ວ່າ ທ່ານພຣະນິໂຄທະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໔໑] ເຮົາບໍ່ຢ້ານໄພ
ພຣະສາດສະດາຂອງເຮົາທັງຫຼາຍຊົງແຫຼມຄົມໃນອະມະຕະທຳ
ພິກຂຸທັງຫຼາຍຍ່ອມດຳເນີນຕາມຫົນທາງທີ່ບໍ່ມີໄພ

## ໒. ຈິດຕະກະເຖຣະຄາຖາ

### ພາສິດຂອງພຣະຈິດຕະກະເຖຣະ

ຮູ້ວ່າ ທ່ານພຣະຈິດຕະກະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໔໒] ນົກຍູງທັງຫຼາຍ ມີຂົນຄໍຂຽວງົດງາມ ມີຫອນສວຍ
ຮ້ອງພິດພື້ນຢູ່ໃນປ່າກາຣະວີ

ນົກຍູງເຫຼົ່ານັ້ນພາກັນຮ້ອງພຶດພື້ນໃນຍາມມີລົມໜາວພ້ອມກັບຝົນ
ຍ່ອມກະຕຸ້ນເຕືອນຜູ້ຈະເລີນຊານເຊິ່ງຫຼັບຢູ່ໃຫ້ຕື່ນຂຶ້ນ

## ໓. ໂຄສາລະເຖຣະຄາຖາ

### ພາສິດຂອງພຣະໂຄສານເຖຣະ

ຮູ້ວ່າ ທ່ານພຣະໂຄສານເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໔໓] ເຮົາສັນເຂົ້າມະທຸປາຍາດ[໑] ໃຕ້ພຸ່ມໄຜ່
ພິຈາລະນາເຖິງຄວາມເກີດແລະຄວາມເສື່ອມຂອງຂັນທັງຫຼາຍໂດຍເຄົາລົບ
ຈະກັບໄປສູ່ສານຸບັນພົດທີ່ເຮົາເຄີຍຢູ່ ແລ້ວເພີ່ມພູນວິເວກຕໍ່ໄປ

## ໔. ສຸຄັນທະເຖຣະຄາຖາ

### ພາສິດຂອງພຣະສຸຄັນທະເຖຣະ

ຮູ້ວ່າ ທ່ານພຣະສຸຄັນທະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໔໔] ພິກຂຸບວດຍັງບໍ່ທັນຄົບພັນສາ
ແນມເຫັນທຳວ່າເປັນທຳດີງາມ
ບັນລຸວິດຊາ[໑] ໓ ແລ້ວ
ໄດ້ເຮັດຕາມຄຳສອນຂອງພຣະພຸດທະເຈົ້າແລ້ວ

## ໕. ນັນທິຍະເຖຣະຄາຖາ

### ພາສິດຂອງພຣະນັນທິຍະເຖຣະ

ຮູ້ວ່າ ທ່ານພຣະນັນທິຍະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໔໕] ມານຜູ້ມີກຳຫຍາບຊ້າແລະມີຊາດຊົ່ວຊາມ
ທ່ານບຽດບຽນພິກຂຸຜູ້ມີຈິດບັນລຸອະຣະຫັດຕະຜົນ
ສະຫວ່າງສະໄຫວດ້ວຍຍາໂນພາດ[໒] ຢູ່ປະຈຳເຊັ່ນນັ້ນ
ຈະໄດ້ຮັບທຸກມະທັນ

# ໖. ອະໄພເຖຣະຄາຖາ

## ພາສິດຂອງພຣະອະໄພເຖຣະ

ຮູ້ວ່າ ທ່ານພຣະອະໄພເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໘໖] ຍ້ອນເຮົາໄດ້ຟັງວາຈາສຸພາສິດຂອງພຣະພຸດທະເຈົ້າ
ຜູ້ເປັນເຜົ່າພັນພຣະອາທິດ
ຈຶ່ງໄດ້ຮູ້ແຈ້ງທຳອັນລະອຽດຍິ່ງ
ຄືບຸກຄົນຍິງປາຍຂົນຊາຍດ້ວຍລູກສອນ

# ໗. ໂລມະສະກັງຄິຍະເຖຣະຄາຖາ

## ພາສິດຂອງພຣະໂລມະສະກັງຄິຍະເຖຣະ

ຮູ້ວ່າ ທ່ານພຣະໂລມະສະກັງຄິຍະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໘໗] ເຮົາຈະໃຊ້ເອິກຜ່າຫຍ້າແພກ ຫຍ້າຄາ ຫຍ້າດອກເລົາ ຫຍ້າແຝກ
ຫຍ້າມຸ້ງກະຕ່າຍ ແລະຫຍ້າປ້ອງເພີ່ມພູນວິເວກ

# ໘. ຊຳພຸຄາມິກະປຸດຕະເຖຣະຄາຖາ

## ພາສິດຂອງພຣະຊຳພຸຄາມິກະບຸດເຖຣະ

ຮູ້ວ່າ ທ່ານພຣະຊຳພຸຄາມິກະບຸດເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໘໘] ທ່ານຍັງຂົນຂວາຍປະດັບຕົກແຕ່ງດ້ວຍເສື້ອຜ້າຢູ່ບໍ
ຍັງຍິນດີປະດັບປະດາຮ່າງກາຍຢູ່ບໍ
ທ່ານເຮັດກິ່ນສິນໃຫ້ກະຈອນກະຈາຍໄປຢູ່ບໍ
ຄົນທຸສິນນອກນີ້ບໍ່ອາດເຮັດກິ່ນສິນໃຫ້ກະຈອນກະຈາຍໄປໄດ້

# ໙. ຫາຣິຕະເຖຣະຄາຖາ

## ພາສິດຂອງພຣະຫາຣິຕະເຖຣະ

ຮູ້ວ່າ ພຣະຫາຣິຕະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໔໙] ຫາຣິຕະ ທ່ານຈົ່ງຍົກຕົນຂຶ້ນ ທ່ານຈົ່ງເຮັດຈິດໃຫ້ຊື່
ຄືຊ່າງສອນດັດສອນໃຫ້ຊື່ ແລ້ວທຳລາຍອະວິດຊາສາ

## ໑໐. ອຸດຕິຍະເຖຣະຄາຖາ

### ພາສິດຂອງພຣະອຸດຕິຍະເຖຣະ

ຮູ້ວ່າ ທ່ານພຣະອຸດຕິຍະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໕໐] ເມື່ອອາພາດເກີດຂຶ້ນແກ່ເຮົາ ເຮົາກໍໄດ້ສະຕິວ່າ
ອາພາດເກີດແກ່ເຮົາແລ້ວ ເວລານີ້ເຮົາບໍ່ຄວນຜະໝາດ

**ຕະຕິຍະວັກ ຈົບ**

### ລວມເລື້ອງພຣະເຖຣະທີ່ມີໃນວັກນີ້ ຄື

໑. ພຣະນິໂຄທະເຖຣະ
໒. ພຣະໂຄສາລະເຖຣະ
໓. ພຣະນັນທິຍະເຖຣະ
໗. ພຣະໂລມະສະກັງຄິຍະເຖຣະ
໙. ພຣະຫາຣິຕະເຖຣະ
໔. ພຣະຈິດຕະກະເຖຣະ
໔. ພຣະສຸຄັນທະເຖຣະ
໖. ພຣະອະໄພເຖຣະ
໘. ພຣະຊຳພຸຄາມິກະບຸດເຖຣະ
໑໐. ພຣະອຸດຕິຍະເຖຣະ

# ໔. ຈະຕຸດຖະວັກ

## ໝວດທີ ໔

## ໑. ຄະຫຸຣະຕີຣິຍະເຖຣະຄາຖາ

### ພາສິດຂອງຄະຫຸຣະຕີຣິຍະເຖຣະ

ຮູ້ວ່າ ທ່ານພຣະຄະຫຸຣະຕີຣິຍະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໕໑] ບຸກຄົນຖືກເຮືອດແລະຍຸງກັດໃນປ່າໃຫຍ່
ເພິ່ງເປັນຜູ້ມີສະຕິອົດກັ້ນໃນອັນຕະລາຍນັ້ນ
ຄືຊ້າງໃນສົງຄາມ

# ๘. ສຸບປິຍະເຖຣະຄາຖາ

## ພາສິດຂອງພຣະສຸບປິຍະເຖຣະ

ຮູ້ວ່າ ທ່ານພຣະສຸບປິຍະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໙๘] ບຸກຄົນຜູ້ມີຄວາມຊະຣາ
ພຽນເຜົາຜານກິເລດຢູ່
ເພິ່ງບັນລຸນິບພານອັນປາສະຈາກຄວາມແກ່
ປາສະຈາກອາມິດ
ເປັນທຳສະງົບກະເສມຈາກໂຍຄະ (ແລະ)ປະເສີດຢ່າງຍິ່ງ

# ໙. ໂສປາກະເຖຣະຄາຖາ

## ພາສິດຂອງພຣະໂສປາກະເຖຣະ

ຮູ້ວ່າ ທ່ານພຣະໂສປາກະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໙໙] ບຸກຄົນມີອັດທະຍາໄສປະກອບດ້ວຍເມດຕາ
ໃນບຸດຄົນດຽວທີ່ໜ້າຮັກ ສັນໃດ
ພິກຂຸເພິ່ງມີອັດທະຍາໄສປະກອບດ້ວຍເມດຕາ
ໃນສັດທັງປວງໃນທີ່ທຸກແຫ່ງ ສັນນັ້ນ

# ໑໐. ໂປສິຍະເຖຣະຄາຖາ

## ພາສິດຂອງພຣະໂປສິຍະເຖຣະ

ຮູ້ວ່າ ທ່ານພຣະໂປສິຍະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໑໐໐] ຍິງເຫຼົ່ານີ້ບໍ່ເຂົ້າໃກ້ເປັນການດີ
ແຕ່ພໍເຂົ້າໃກ້ ກໍຈັກກໍ່ຄວາມພິນາດໃຫ້ເນືອງນິດ
ເຮົາອອກຈາກປ່າມາສູ່ເຮືອນ ຈາກນັ້ນກໍເຂົ້າໄປສູ່ເຮືອນ
ເຮົາຊື່ໂປສິຍະ ບໍ່ບອກລາໃຜ ລຸກຈາກຕຽງຫຼີກໜີໄປ

# ໕. ສາມັນຍະການິເຖຣະຄາຖາ

## ພາສິດຂອງພຣະສາມັນຍະການິເຖຣະ

ຮູ້ວ່າ ທ່ານພຣະສາມັນຍະການິເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໓໕] ບຸກຄົນຜູ້ຕ້ອງການນິຣາມິດສຸກ
ປະພຶດໃຫ້ສົມຄວນແກ່ການໄດ້ຄວາມສຸກນັ້ນ ຍ່ອມໄດ້ຄວາມສຸກ
ຜູ້ພ່ຳເພັງອະຣິຍະມັກມີອົງ ໘ ອັນເປັນທາງສາຍຊື່
ບໍ່ຄົດຄ້ຽວ ເພື່ອບັນລຸອະມະຕະບົດ[໑]
ຍ່ອມໄດ້ກຽດຕິຄຸນແລະຈະເລີນຍົດ

# ໖. ກຸມາປຸດຕະເຖຣະຄາຖາ

## ພາສິດຂອງພຣະກຸມາບຸດເຖຣະ

ຮູ້ວ່າ ທ່ານພຣະກຸມາບຸດເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໓໖] ການຟັງເປັນຄວາມດີ
ການປະພຶດຕົນເປັນຄົນມັກໜ້ອຍເປັນຄວາມດີ
ການປະຕິບັດເພື່ອລະການມະຄຸນ ໕ ທຸກເມື່ອເປັນຄວາມດີ
ການຖາມສິ່ງທີ່ເປັນປະໂຫຍດເປັນຄວາມດີ
ການປະຕິບັດຕາມໂອວາດໂດຍເຄົາລົບເປັນຄວາມດີ
ກິດມີການຟັງເປັນຕົ້ນເປັນເຄື່ອງໝາຍຄວາມເປັນສະມະນະຜູ້ໝົດຄວາມກັງວົນ

# ໗. ກຸມາປຸດຕະເຖຣະສະຫາຍະກະເຖຣະຄາຖາ

## ພາສິດຂອງພຣະກຸມາບຸດສະຫາຍະກະເຖຣະ

ຮູ້ວ່າ ທ່ານພຣະກຸມາບຸດເຖຣະສະຫາຍະກະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໓໗] ພິກຂຸທັງຫຼາຍຜູ້ບໍ່ສັງລວມຈິດ ທ່ອງທ່ຽວໄປຕາມຊົນນະບົດຕ່າງ ໆ
ຍ່ອມເຮັດສະມາທິຄາດເຄື່ອນ
ການທ່ອງທ່ຽວໄປສູ່ແວ່ນແຄວັ້ນຈະຊ່ອຍອັນໃດໄດ້ນໍ
ຍ້ອນແນວນັ້ນ ພິກຂຸເພິ່ງກຳຈັດຄວາມແຂ່ງດີ

ບໍ່ເພິ່ງໃຫ້ມິດສາວິຕົກແລະກິເລດມີຕັນຫາເປັນຕົ້ນຄອບງຳ ຈະເລີນຊານ

## ໗. ຄະວຳປະຕິເຖຣະຄາຖາ

### ພາສິດຂອງພຣະຄະວຳປະຕິເຖຣະ

ຮູ້ວ່າ ພຣະຜູ້ມີພຣະພາກເຈົ້າຕັດສັນເສີນພຣະຄະວຳປະຕິເຖຣະດ້ວຍພຣະຄາຖາດັ່ງນີ້ວ່າ

[໓໗] ເທວະດາທັງຫຼາຍພາກັນນອບນ້ອມພຣະຄະວຳປະຕິ
ຜູ້ຫ້າມແມ່ນ້ຳສະຣະພູໃຫ້ຢຸດໄຫຼໄດ້ດ້ວຍລິດ
ບໍ່ຕິດຢູ່ໃນກິເລດແລະຕັນຫາໃດ ໆ ບໍ່ຫວັ່ນໄຫວຕໍ່ສິ່ງອັນໃດທັງໝົດ
ຂ້າມກິເລດເຄື່ອງຂ້ອງທັງໝົດໄດ້
ເປັນມະຫາມຸນີ ຜູ້ບັນລຸນິບພານແລ້ວ

## ໘. ຕິດສະເຖຣະຄາຖາ

### ພາສິດຂອງພຣະຕິດສະເຖຣະ

ຮູ້ວ່າ ທ່ານພຣະຕິດສະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໓໘] ພິກຂຸເພິ່ງມີສະຕິພະຍາຍາມລະກາມຣາຄະ
ຄືຄົນພະຍາຍາມໃຊ້ອາວຸດ
ຕັດເຄື່ອງປະຫານທີ່ຊື່ວ່າໂອມັດຖະ
ເມື່ອຫົວຖືກໄຟໄໝ້

## ໑໐. ວັດຖະມານະເຖຣະຄາຖາ

### ພາສິດຂອງພຣະວັດຖະມານະເຖຣະ

ຮູ້ວ່າ ທ່ານພຣະວັດຖະມານະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໔໐] ພິກຂຸເພິ່ງມີສະຕິພະຍາຍາມລະພາວະຣາຄະ
ຄືຄົນພະຍາຍາມໃຊ້ອາວຸດ
ຕັດເຄື່ອງປະຫານທີ່ຊື່ວ່າໂອມັດຖະ
ເມື່ອຫົວຖືກໄຟໄໝ້

### ຈະຕຸດຖະວັກ ຈົບ

## ລວມເລື້ອງພຣະເຖຣະທີ່ມີໃນວັກນີ້ ຄື



# ໕. ປັນຈະມະວັກ

### ໝວດທີ ໕

## ໑. ສິຣິວັດທະເຖຣະຄາຖາ

### ພາສິດຂອງພຣະສິຣິວັດທະເຖຣະ

ຮູ້ວ່າ ທ່ານພຣະສິຣິວັດທະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໔໑] ພິກຂຸຜູ້ເປັນບຸດຂອງພຣະພຸດທະອົງຜູ້ໝັ້ນຄົງ ຫາຜູ້ສະເໝີເໝືອນບໍ່ໄດ້
ໄປເຂົ້າຊານຢູ່ຕາມຮ່ອມພູ ຄື ສາຍຟ້າແມບ
ສ່ອງລອດເຂົ້າໄປຕາມປ່ອງພູທີ່ຊື່ເວພາຣະແລະປັນທະວະ

## ໔. ຂະທິຣະວະນິຍະເຖຣະຄາຖາ

### ພາສິດຂອງພຣະຂະທິຣະວະນິຍະເຖຣະ

ຮູ້ວ່າ ທ່ານພຣະຂະທິຣະວະນິຍະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໔໔] ສາມະເນນຈາລະ ສາມະເນນອຸປະຈາລະ ສາມະເນນສີສູປະຈາລະ
ພວກທ່ານຄອງສະຕິໝັ້ນຄົງຢູ່ບໍ
ຫຼວງລຸງໆຂອງພວກທ່ານ ຜູ້ປຽບຄືນາຍຂະມັງທະນູ
ຜູ້ສາມາດຍິງທະລວງປາຍຂົນຊາຍໄດ້
ຍ້ອນມີປັນຍາຫຼັກແຫຼມວ່ອງໄວຮູ້ແຈ້ງຕະຫຼອດມາເຖິງແລ້ວ

# ໓. ສຸມັງຄະລະເຖຣະຄາຖາ

## ພາສິດຂອງພຣະສຸມັງຄະລະເຖຣະ

ຮູ້ວ່າ ທ່ານພຣະສຸມັງຄະລະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໔໓] ເຮົາພົ້ນດີແລ້ວ ພົ້ນແລ້ວດ້ວຍດີ
ພົ້ນດີແລ້ວຈາກການຫຼັງກ່ອມ ໓ ກໍລະນີ ຄື
ຈາກການກ່ຽວເຂົ້າ ການໄຖນາ ແລະການຖາງຫຍ້າ
ເຖິງວ່າງານກ່ຽວຫຍ້າເປັນຕົ້ນ ຈະມີຢູ່ໃນບ່ອນໃກ້ ໆ ນີ້ກໍຕາມ
ແຕ່ກໍບໍ່ເໝາະ ບໍ່ຄວນແກ່ເຮົາທັງໝົດ
ພຽນເພ່ງເທີ້ນ ສຸມັງຄະລະ ຈົ່ງເຜົາເທີ້ນ ສຸມັງຄະລະ
ທ່ານຈົ່ງເປັນຜູ້ບໍ່ຜະໝາດຢູ່ເທີ້ນ ສຸມັງຄະລະ

# ໔. ສານຸເຖຣະຄາຖາ

## ພາສິດຂອງພຣະສານຸເຖຣະ

ຮູ້ວ່າ ທ່ານພຣະສານຸເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໔໔] ແມ່ອອກ ຊົນທັງຫຼາຍຮ້ອງໄຫ້ເຖິງຄົນທີ່ຕາຍໄປແລ້ວ
ຫຼືຍັງມີຊີວິດຢູ່ (ແຕ່)ຫາບໍ່ພົ້
ແມ່ອອກ ແມ່ອອກຍັງແນມເຫັນອາດຕະມາມີຊີວິດຢູ່
ເປັນຫຍັງຈຶ່ງຮ້ອງໄຫ້ເຖິງອາດຕະມານໍ ແມ່ອອກ

# ໕. ຣະມະນີຍະວິຫາຣິເຖຣະຄາຖາ

## ພາສິດຂອງພຣະຣະມະນີຍະວິຫາຣິເຖຣະ

ຮູ້ວ່າ ທ່ານພຣະຣະມະນີຍະວິຫາຣິເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໔໕] ຂໍທ່ານທັງຫຼາຍຈົ່ງຈື່ຂ້ານ້ອຍວ່າ
ເປັນສາວົກຂອງພຣະສຳມາສຳພຸດທະເຈົ້າ
ຜູ້ຊື່ວ່າສົມບູນດ້ວຍທັດສະນະ[໑]
ຍ້ອນຜິດພາດແລ້ວສາມາດຕັ້ງຕົນໄດ້

ຄືງົວອາຊາໄນຈະເລີນເຕັມທີ່
ພະລາດລົ້ມແລ້ວລຸກຂຶ້ນຢືນໃໝ່ໄດ້ ສັນນັ້ນ

## ๗. ສະມິດທິເຖຣະຄາຖາ

### ພາສິດຂອງພຣະສະມິດທິເຖຣະ

ຮູ້ວ່າ ທ່ານພຣະສະມິດທິເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໔໗] ເຮົາອອກຈາກເຮືອນບວດເປັນບັນພະຊິດດ້ວຍສັດທາ
ມີສະຕິປັນຍາຈະເລີນ ມີຈິດໝັ້ນຄົງດີແລ້ວ
ເຈົ້າມານຮ້າຍເອີຍ
ເຈົ້າຈົ່ງບັນດານຮູບແປກປະຫລາດຕ່າງ ໆ ຕາມໃຈມັກເທີ້ນ
ແຕ່ຈະບໍ່ອາດເຮັດໃຫ້ເຮົາສະທົກສະທ້ານໄດ້ດອກ

## ๘. ອຸດຊະຍະເຖຣະຄາຖາ

### ພາສິດຂອງພຣະອຸດຊະຍະເຖຣະ

ຮູ້ວ່າ ທ່ານພຣະອຸດຊະຍະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໔໘] ຂ້າແດ່ພຣະພຸດທະອົງຜູ້ຊົງແກ່ກ້າ
ຂ້າພຣະອົງຂໍນອບນ້ອມແດ່ພຣະອົງ
ພຣະອົງຊົງລຸດພົ້ນແລ້ວຈາກກິເລດທັງມວນ
ຂ້າພຣະອົງດໍາລົງຢູ່ໃນພຣະໂອວາດຂອງພຣະອົງ
ຈຶ່ງຢູ່ຢ່າງຜູ້ປາສະຈາກອາສະວະກິເລດ

## ๙. ສັນຊະຍະເຖຣະຄາຖາ

### ພາສິດຂອງພຣະສັນຊະຍະເຖຣະ

ຮູ້ວ່າ ທ່ານພຣະສັນຊະຍະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໔໙] ຕັ້ງແຕ່ເຮົາອອກຈາກເຮືອນບວດເປັນບັນພະຊິດ

ຄວາມດໍາຣິອັນຕໍ່າຊາມ ປະກອບດ້ວຍໂທດ
ເຮົາບໍ່ເຄີຍຮູ້ຈັກເລີຍ

## ໗. ຣາມະເນີຍຍະກະເຖຣະຄາຖາ

### ພາສິດຂອງຣາມະເນີຍຍະກະເຖຣະ

ຮູ້ວ່າ ທ່ານພຣະຣາມະເນີຍຍະກະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໔໗] ເຈົ້າມານຮ້າຍເອີຍ ຈິດຂອງເຮົານັ້ນບໍ່ຫວັ່ນໄຫວ
ຍ້ອນສຽງຈ້ອກແຈ້ກຂອງຝູງນົກກະຈາບແລະສຽງກູ່ກ້ອງຂອງຝູງລິງ
ຍ້ອນຈິດຂອງເຮົາຍິນດີໃນເອກັກຄະຕາຣົມ[໑]

## ໑໐. ວິມະລະເຖຣະຄາຖາ

### ພາສິດຂອງພຣະວິມະລະເຖຣະ

ຮູ້ວ່າ ທ່ານພຣະວິມະລະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໕໐] ພື້ນປະຖະພີຊຸ່ມຊື່ນດ້ວຍນໍ້າຝົນ
ລົມເຈືອລະອອງຝົນກໍໂຊຍພັດ
ທັງສາຍຟ້າກໍແມບຢູ່ທົ່ວທ້ອງຟ້າ
(ແຕ່)ວິຕົກ[໒] ທັງຫຼາຍລະງັບໄປ
ຈິດຂອງເຮົາຕັ້ງໝັ້ນດີແລ້ວ

**ປັນຈະມະວັກ ຈົບ**

## ລວມເລື້ອງພຣະເຖຣະທີ່ມີໃນວັກນີ້ ຄື

# ຜ. ສັດຖະວັກ

## ໝວດທີ ຜ

## ໑. ໂຄທິກະເຖຣະຄາຖາ

### ພາສິດຂອງພຣະໂຄທິກະເຖຣະ

ຮູ້ວ່າ ທ່ານພຣະໂຄທິກະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໕໑] ຝົນຕົກລົງມາ ສຽງດັ່ງກະທົ່ມຄ້າຍສຽງເພງອັນມ່ວນ
ກຸດຕິຂອງເຮົາສະບາຍ ມຸງບັງມິດຊິດດີ ຈິດເຮົາຕັ້ງໝັ້ນດີແລ້ວ
ຖ້າຕ້ອງການຈະຕົກກໍຈົ່ງຕົກລົງມາເທີ້ນຝົນ

## ໒. ສຸພາຫຸເຖຣະຄາຖາ

### ພາສິດຂອງພຣະສຸພາຫຸເຖຣະ

ຮູ້ວ່າ ທ່ານພຣະສຸພາຫຸເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໕໒] ຝົນຕົກລົງມາ ສຽງດັ່ງກະທົ່ມຄ້າຍສຽງເພງອັນມ່ວນ
ກຸດຕິຂອງເຮົາສະບາຍ ມຸງບັງມິດຊິດດີ ຈິດເຮົາຕັ້ງໝັ້ນດີແລ້ວ
ຖ້າຕ້ອງການຈະຕົກກໍຈົ່ງຕົກລົງມາເທີ້ນຝົນ

## ໓. ວັລລິຍະເຖຣະຄາຖາ

### ພາສິດຂອງພຣະວັນລິຍະເຖຣະ

ຮູ້ວ່າ ທ່ານພຣະວັນລິຍະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໕໓] ຝົນຕົກລົງມາ ສຽງດັ່ງກະທົ່ມຄ້າຍສຽງເພງອັນມ່ວນ
ກຸດຕິຂອງເຮົາສະບາຍ ມຸງບັງມິດຊິດດີ
ໃນກຸດຕິນັ້ນ ເຮົາຢູ່ຢ່າງຜູ້ບໍ່ຜະໝາດ
ຖ້າຕ້ອງການຈະຕົກກໍຈົ່ງຕົກລົງມາເທີ້ນຝົນ

# ໔. ອຸດຕິຍະເຖຣະຄາຖາ
## ພາສິດຂອງພຣະອຸດຕິຍະເຖຣະ

ຮູ້ວ່າ ທ່ານພຣະອຸດຕິຍະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໕໔] ຝົນຕົກລົງມາ ສຽງດັງກະທຶ່ມຄ້າຍສຽງເພງອັນມ່ວນ
ກຸດຕິຂອງເຮົາສະບາຍ ມຸງບັງມິດຊິດດີ
ໃນກຸດຕິນັ້ນ ເຮົາຢູ່(ແຕ່ຜູ້ດຽວ) ບໍ່ມີເພື່ອນ
ຖ້າຕ້ອງການຈະຕົກກໍຈົ່ງຕົກລົງມາເທີ້ນຝົນ

# ໕. ອັນຊະນະວະນິຍະເຖຣະຄາຖາ
## ພາສິດຂອງພຣະອັນຊະນະວະນິຍະເຖຣະ

ຮູ້ວ່າ ທ່ານພຣະອັນຊະນະວະນິຍະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໕໕] ເຮົາເຂົ້າໄປປ່າອັນຊະນາວັນ ເອົາຕັ່ງເປັນກຸດຕິ
ບັນລຸວິດຊາ ໓ ແລ້ວ
ເຮົາໄດ້ເຮັດຕາມຄຳສອນຂອງພຣະພຸດທະເຈົ້າແລ້ວ

# ໖. ກຸຕິວິຫາຣີເຖຣະຄາຖາ
## ພາສິດຂອງພຣະກຸຕິວິຫາຣີເຖຣະ

ຮູ້ວ່າ ຄົນເຝົ້ານາແລະພຣະກຸດຕິວິຫາຣີເຖຣະສົນທະນາກັນວ່າດັ່ງນີ້

[໕໖] (ຄົນເຝົ້ານາຖາມວ່າ) ໃຜນໍນັ່ງຢູ່ໃນຕູບ
ພຣະກຸຕິວິຫາຣີເຖຣະ(ຕອບວ່າ) ພິກຂຸຜູ້ປາສະຈາກຣາຄະ
ມີຈິດໝັ້ນຄົງດີແລ້ວ ຢູ່ໃນຕູບ
ເຂົ້າໃຈແນວນີ້ເທີ້ນພໍ່ອອກ
ຕູບທີ່ທ່ານສ້າງໄວ້ແລ້ວ ບໍ່ເປົ່າປະໂຫຍດເລີຍ

# ໗. ທຸຕິຍະກຸຕິວິຫາຣີເຖຣະຄາຖາ
## ພາສິດຂອງພຣະທຸຕິຍະກຸຕິວິຫາຣີເຖຣະ

ຮູ້ວ່າ ທ່ານພຣະທຸຕິຍະກຸຕິວິຫາຣີເຖຣະໄດ້ກ່າວຄາຖາທີ່ເທວະດາໄດ້ກ່າວກັບຕົນວ່າດັ່ງນີ້

[໕໗] ກຸດຕິ°ຫຼັງນີ້ເປັນກຸດຕິເກົ່າ
ທ່ານປາຖະໜາກຸດຕິໃໝ່ຫຼັງອື່ນເຮັດຫຍັງ
ຂໍທ່ານຈົ່ງຄາຍຄວາມຫວັງໃນກຸດຕິຫຼັງໃໝ່ສາເທີ້ນ
ຍ້ອນກຸດຕິຫຼັງໃໝ່ນຳທຸກມາໃຫ້

## ໙. ຣະມະນີຍະກຸຕິກະເຖຣະຄາຖາ

### ພາສິດຂອງພຣະຣະມະນີຍະກຸຕິກະເຖຣະ

ຮູ້ວ່າ ທ່ານພຣະຣະມະນີຍະກຸຕິກະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໕໙] ກຸດຕິຂອງເຮົາໜ້າອອນຊອນ
ເປັນທີ່ພໍໃຈ ທາຍົກຜູ້ມີສັດທາຖວາຍໄວ້
ອາດຕະມາບໍ່ຕ້ອງການພວກແມ່ຍິງ
ພວກທ່ານຈົ່ງໄປໃນບ່ອນທີ່ພວກເຂົາຕ້ອງການພວກແມ່ຍິງເທີ້ນ

## ໙. ໂກສັນລະວິຫາຣີເຖຣະຄາຖາ

### ພາສິດຂອງພຣະໂກສັນລະວິຫາຣີເຖຣະ

ຮູ້ວ່າ ທ່ານພຣະໂກສັນລະວິຫາຣີເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໕໙] ເຮົາບວດດ້ວຍສັດທາ ເຮົາສ້າງກຸດຕິຢູ່ໃນປ່າ
ເຮົາຈຶ່ງຢູ່ຢ່າງຄົນບໍ່ຜະໝາດ
ມີຄວາມພຽນຢູ່ສະເໝີ ແລະມີສະຕິສຳປະຊັນຍະ

## ໑໐. ສີວະລີເຖຣະຄາຖາ

### ພາສິດຂອງພຣະສີວະລີເຖຣະ

ຮູ້ວ່າ ທ່ານພຣະສີວະລີເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໖໐] ຄວາມປາຖະໜາທີ່ເຮົາເຂົ້າໄປສູ່ກຸດຕິ
ເຝົ້າສະແຫວງຫາວິດຊາແລະວິມຸດຕິອັນເປັນເຄື່ອງຖອນມານານຸໄສ
ຄວາມດຳຣິນັ້ນຂອງເຮົາສຳເລັດແລ້ວ

**ສັດຖະວັກ ຈົບ**

## ລວມເລື່ອງພຣະເຖຣະທີ່ມີໃນວັກນີ້ ຄື

໑. ພຣະໂຄທິກະເຖຣະ
໓. ພຣະວັນລິຍະເຖຣະ
໕. ພຣະອັນຊະນະວະນິຍະເຖຣະ
໗. ພຣະທຸຕິຍະກຸຕິວິຫາຣີເຖຣະ
໙. ພຣະໂກສັນລະວິຫາຣີເຖຣະ
໒. ພຣະສຸພາຫຸເຖຣະ
໔. ພຣະອຸດຕິຍະເຖຣະ
໖. ພຣະກຸຕິວິຫາຣີເຖຣະ
໘. ພຣະຣະມະນີຍະກຸຕິກະເຖຣະ
໑໐. ພຣະສີວະລີເຖຣະ

# ໗. ສັດຕະມະວັກ

## ໝວດທີ ໗

## ໑. ວັປປະເຖຣະຄາຖາ

### ພາສິດຂອງພຣະວັບປະເຖຣະ

ຮູ້ວ່າ ທ່ານພຣະວັບປະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໖໑] ຜູ້ເຫັນທຳຍ່ອມເຫັນທັງຜູ້ເຫັນທຳແລະຜູ້ບໍ່ເຫັນທຳ
ຜູ້ບໍ່ເຫັນທຳຍ່ອມບໍ່ເຫັນທັງຜູ້ບໍ່ເຫັນທຳແລະຜູ້ເຫັນທຳ

## ໒. ວັດຊີປຸດຕະກະເຖຣະຄາຖາ

### ພາສິດຂອງພຣະວັດຊີບຸດເຖຣະ

ຮູ້ວ່າ ທ່ານພຣະວັດຊີບຸດເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໖໒] ເຮົາຢູ່ໃນປ່າແຕ່ຜູ້ດຽວ ຄືກັບຂອນໄມ້ທີ່ເຂົາຖິ້ມໄວ້ໃນປ່າ
ຄົນທັງຫຼາຍປາຖະໜາຈະເປັນຄືກັບເຮົາ
ຄືສັດນະຮົກພາກັນປາຖະໜາຜູ້ໄປສະຫວັນ

## ໓. ປັກຂະເຖຣະຄາຖາ

### ພາສິດຂອງພຣະປັກຂະເຖຣະ

ຮູ້ວ່າ ທ່ານພຣະປັກຂະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໖໓] ຕ່ອນຊີ້ນພາດລຸດຈາກປາກແຫຼວ
ແຫຼວຕິດໃຈໃນຕ່ອນຊີ້ນນັ້ນກໍຫວນກັບມາເວີ່ນເອົາອີກ
ນິບພານທີ່ໜ້າອອນຊອນເຊິ່ງພຣະອະຣິຍະເຈົ້າ
ຍິນດີແລ້ວເປັນຄວາມສຸກໂດຍສ່ວນດຽວ
ມີຄວາມສຸກເຊິ່ງເກີດຈາກຜົນສະມາບັດຕິດຕາມມາ
ເປັນກິດທີ່ເຮົາເຮັດສຳເລັດແລ້ວ

## ໔. ວິມະລະໂກນທັນຍະເຖຣະຄາຖາ

### ພາສິດຂອງພຣະວິມົນໂກນຍະເຖຣະ

ຮູ້ວ່າ ທ່ານພຣະວິມົນໂກນທັນຍະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໖໔] ພິກຂຸຜູ້ເກີດຈາກນາງທຸມະ[໑]ກັບພຣະເຈົ້າປັນທະຣະເກດ[໒]
ຜູ້ຄອງສະເຫວດຕະສັດ
ລຸດທຸງ[໓]ໄດ້ ໃຊ້ທຸງໄຊນັ້ນແລ[໔]ກຳຈັດມານະມີປະການຕ່າງ ໆ
ເປັນຄືລຸດທຸງຜືນໃຫຍ່ລົງໄດ້

## ໕. ອຸກເຂປະກະຕະວັດສະເຖຣະຄາຖາ

### ພາສິດຂອງພຣະອຸກເຂປະກະຕະວັດສະເຖຣະ

ຮູ້ວ່າ ທ່ານພຣະອຸກເຂປະກະຕະວັດສະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໖໕] ພິກຂຸຜູ້ນັ່ງສະງົບສະງ່ຽມ ມີຄວາມປາໂມດເປັນຢ່າງຍິ່ງ
ຍ່ອມກ່າວພຣະພຸດທະພົດເຊິ່ງທ່ານພຣະອຸກເຂປະກະຕະວັດສະເຖຣະ
ທ່ອງຈົບຄ່ອງປາກມາເປັນເວລາຫຼາຍປີ ແກ່ຊາວບ້ານທັງຫຼາຍໄດ້

## ໖. ເມຄິຍະເຖຣະຄາຖາ

### ພາສິດຂອງພຣະເມຄິຍະເຖຣະ

ຮູ້ວ່າ ທ່ານພຣະເມຄິຍະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໖໖] ພຣະມະຫາວີຣະຜູ້ເຖິງຝັ່ງທຳທັງປວງແລ້ວ

ໄດ້ຊີງພໍ່າສອນເຮົາ
ເຮົາຟັງທໍາຂອງພຣະພຸດທະອົງແລ້ວ ມີສະຕິ
ຢູ່ໃນສໍານັກ ໄດ້ບັນລຸວິດຊາ ໓
ເຮົາໄດ້ເຮັດຕາມຄໍາສອນຂອງພຣະພຸດທະເຈົ້າແລ້ວ

## ໗. ເອກະທໍາມະສະວະນິຍະເຖຣະຄາຖາ

### ພາສິດຂອງພຣະເອກະທໍາມະສະວະນິຍະເຖຣະ

ຮູ້ວ່າ ທ່ານພຣະເອກະທໍາມະສະວະນິຍະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໖໗] ເຮົາເຜົາກິເລດທັງຫຼາຍແລ້ວ
ເຮົາຖອນພົບທັງປວງໄດ້ແລ້ວ
ການວຽນວ່າຍຕາຍເກີດສິ້ນໄປແລ້ວ
ບັດນີ້ ບໍ່ມີການເກີດອີກ

## ໘. ເອກຸທານິຍະເຖຣະຄາຖາ

### ພາສິດຂອງພຣະເອກຸທານິຍະເຖຣະ

ຮູ້ວ່າ ທ່ານພຣະເອກຸທານິຍະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໖໘] ຜູ້ມີຈິດໝັ້ນຄົງ ບໍ່ຜະໝາດ
ເປັນພຣະຂີນາສົບ ສຶກສາທາງແຫ່ງຄວາມເປັນພຣະມຸນີ[໑]
ຜູ້ໝັ້ນຄົງ ສະງົບ ມີສະຕິທຸກຂະນະ ຍ່ອມເປັນຜູ້ບໍ່ເສົ້າໂສກ

## ໙. ສັນນະເຖຣະຄາຖາ

### ພາສິດຂອງພຣະສັນນະເຖຣະ

ຮູ້ວ່າ ທ່ານພຣະສັນນະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໖໙] ເຮົາໄດ້ສະດັບທໍາ ມີຣົດເລີກ ໂອລານ
ຂອງພຣະຜູ້ມີພຣະພາກເຈົ້າຜູ້ເປັນມະຫາສະມະນະ
ດໍາເນີນຕາມແນວທາງເຊິ່ງພຣະຜູ້ມີພຣະພາກເຈົ້າ

ຜູ້ມີພຣະຍານອັນປະເສີດຄືພຣະສັບພັນຍູ<sup>໔</sup>
ຊົງສະແດງໄວ້ແລ້ວ  ເພື່ອບັນລຸອະມະຕະນິບພານ
ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ
ຊົງຮອບຮູ້ໃນທາງກະເສມຈາກໂຍຄະ

## ໑໐. ປຸນນະເຖຣະຄາຖາ

### ພາສິດຂອງພຣະປຸນນະເຖຣະ

ຮູ້ວ່າ  ທ່ານພຣະປຸນນະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໗໐]	ສີນທີ່ນັ້ນເປັນເລີດໃນໂລກນີ້
ສ່ວນຜູ້ມີປັນຍາ  ເປັນຜູ້ສູງສຸດທັງໃນໝູ່ມະນຸດແລະໝູ່ເທວະດາ
ໄຊຊະນະຈະມີໄດ້ກໍຍ້ອນສີນແລະປັນຍາ

**ສັດຕະມະວັກ  ຈົບ**

## ລວມເລື້ອງພຣະເຖຣະທີ່ມີໃນວັກນີ້  ຄື

໑. ພຣະວັບປະເຖຣະ
໒. ພຣະປັກຂະເຖຣະ
໓. ພຣະອຸກເຂປະກະຕະວັດສະເຖຣະ
໔. ພຣະເອກະທຳມະສະວະນິຍະເຖຣະ
໕. ພຣະສັນນະເຖຣະ
໖. ພຣະວັດຊິບຸດເຖຣະ
໗. ພຣະວິມະລະໂກນທັນຍະເຖຣະ
໘. ພຣະເມຄິຍະເຖຣະ
໙. ພຣະເອກຸທານິຍະເຖຣະ
໑໐. ພຣະປຸນນະເຖຣະ

# ๗. ອັດຖະມະວັກ

## ໝວດທີ ໗

### ໑. ວັດສະປາລະເຖຣະຄາຖາ

#### ພາສິດຂອງພຣະວັດສະປາລະເຖຣະ

ຮູ້ວ່າ ທ່ານພຣະວັດສະປາລະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໗໑] ພຣະໂຍຄາວະຈອນມີປີກາກະຕິເຫັນເນື້ອຄວາມທັງສຸຂຸມແລະລະອຽດຍິ່ງ
ມີປັນຍາສະຫຼາດແຫຼມຄົມ ປະພຶດອ່ອນນ້ອມຖ່ອມຕົນຢູ່ສະເໝີ
ປະຕິບັດຕາມສິນຂອງພຣະພຸດທະເຈົ້າເປັນອາຈິນ
ເພິ່ງບັນລຸນິບພານໄດ້ໂດຍບໍ່ຍາກ

### ໒. ອາຕຸມະເຖຣະຄາຖາ

#### ພາສິດຂອງພຣະອາຕຸມະເຖຣະ

ຮູ້ວ່າ ທ່ານພຣະອາຕຸມະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໗໒] ລຳໄຜ່ອ່ອນ ແຕກຂະແໜງ ມີໃບກິ່ງກ້ານສາຂາແລ້ວ
ເປັນສິ່ງທີ່ຍາກທີ່ຈະຄອນຖອນຂຶ້ນໄດ້ ສັນໃດ
ອາດຕະມາກໍຄືກັນສັນນັ້ນ ເມື່ອແມ່ອອກນຳພັນຍາມາໃຫ້
ຂໍແມ່ອອກໄດ້ໂຜດຍິນຍອມອາດຕະມາເທີ້ນ
ຍ້ອນວ່າ ບັດນີ້ ອາດຕະມາເປັນບັນພະຊິດແລ້ວ

### ໓. ມານະວະເຖຣະຄາຖາ

#### ພາສິດຂອງພຣະມານະວະເຖຣະ

ຮູ້ວ່າ ທ່ານພຣະມານະວະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໗໓] ເຮົາໄດ້ພົບເຫັນຄົນແກ່ ຄົນເຈັບຫຼາຍ
ແລະຄົນຕາຍເມື່ອເຖິງອາຍຸໄຂ

ຫຼັງຈາກນັ້ນກໍລະການາຣົມອັນເປັນທີ່ໜ້າພໍໃຈໄດ້
ຈຶ່ງອອກບວດ

## ໔. ສຸຍາມະນະເຖຣະຄາຖາ

### ພາສິດຂອງພຣະສຸຍາມະນະເຖຣະ

ຮູ້ວ່າ ທ່ານພຣະສຸຍາມະນະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໗໔] ຄວາມພໍໃຈໃນກາມມະຄຸນ ຄວາມຄິດຮ້າຍຜູ້ອື່ນ
ຄວາມທໍດທູ່ຊຶມເຊົາ ຄວາມຟຸ້ງຊ່ານລຳຄານໃຈ
ທັງຄວາມລັງເລສົງໄສຍ່ອມບໍ່ມີແກ່ພິກຂຸໂດຍປະການທັງປວງເລີຍ

## ໕. ສຸສາຣະທະເຖຣະຄາຖາ

### ພາສິດຂອງພຣະສຸສາຣະທະເຖຣະ

ຮູ້ວ່າ ທ່ານພຣະສຸສາຣະທະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໗໕] ການໄດ້ພົບເຫັນເຫຼົ່າສັດຕະບຸຣຸດຜູ້ອົບຮົມຕົນດີແລ້ວເປັນການດີ
ເປັນເຫດໃຫ້ຕັດຄວາມສົງໄສໄດ້
ເຮັດຄວາມຮູ້ໃຫ້ຈະເລີນງອກງາມ
ເຫຼົ່າສັດຕະບຸຣຸດຍ່ອມເຮັດຄົນແມ່ນທີ່ເປັນພານໃຫ້ກາຍເປັນບັນດິດໄດ້
ດັ່ງນັ້ນ ການສະມາຄົມກັບເຫຼົ່າສັດຕະບຸຣຸດຈຶ່ງເປັນການດີ

## ໖. ປີຍັນຊະຫະເຖຣະຄາຖາ

### ພາສິດຂອງພຣະປີຍັນຊະຫະເຖຣະ

ຮູ້ວ່າ ທ່ານພຣະປີຍັນຊະຫະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໗໖] ເມື່ອເຫຼົ່າສັດຍິ່ງຜະຍອງດ້ວຍມານະເປັນຕົ້ນ
ເພິ່ງປະພຶດນອບນ້ອມຖ່ອມຕົນ
ເມື່ອເຫຼົ່າສັດລຸດຍ່ອນຄວາມພຽນພະຍາຍາມ
ເພິ່ງຊ່ອຍເຂົາໃຫ້ຕັ້ງຢູ່ໃນຄວາມພຽນພະຍາຍາມ

ເມື່ອເຫຼົ່າສັດຢູ່ຢ່າງຜູ້ບໍ່ປະພຶດພົມມະຈັນ
ກໍເພິ່ງປະພຶດພົມມະຈັນສາເອງ
ເມື່ອເຫຼົ່າສັດຍິນດີໃນການມະຄຸນ ຕົນກໍບໍ່ເພິ່ງຍິນດີ

## ໗. ຫັດຖາໂຣຫະປຸດຕະເຖຣະຄາຖາ

### ພາສິດຂອງພຣະຫັດຖາໂຣຫະບຸດເຖຣະ

ຮູ້ວ່າ ທ່ານພຣະຫັດຖາໂຣຫະບຸດເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໗໗] ແຕ່ກ່ອນຈິດນີ້ໄດ້ທ່ອງທ່ຽວໄປໃນອາລົມຕ່າງ ໆ
ຕາມຄວາມປາຖະໜາ ຕາມຄວາມຕ້ອງການ ຕາມຄວາມສະບາຍ
ມື້ນີ້ ເຮົາຈະຂົ່ມຈິດນັ້ນໂດຍອຸບາຍອັນແຍບຍົນ
ຄືຄວານຊ້າງຜາບພະຍົດຊ້າງຕົກມັນ

## ໗໘. ເມນທະສິຣະເຖຣະຄາຖາ

### ພາສິດຂອງພຣະເມນທະສິຣະເຖຣະ

ຮູ້ວ່າ ທ່ານພຣະເມນທະສິຣະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໗໘] ເຮົາເມື່ອຍັງບໍ່ໄດ້ຍານທີ່ເປັນເຄື່ອງຍຸດສັງສາຣະວັດ[໑]
ຕ້ອງທ່ອງທ່ຽວໄປສູ່ສັງສາຣະວັດນັບຊາດບໍ່ຖ້ວນ
ກອງທຸກຂອງເຮົາຜູ້ມີຄວາມເກີດເປັນທຸກ ໄດ້ພາດຕົກໄປແລ້ວ

## ໗໙. ຣັກຂິຕະເຖຣະຄາຖາ

### ພາສິດຂອງພຣະຣັກຂິຕະເຖຣະ

ຮູ້ວ່າ ທ່ານພຣະຣັກຂິຕະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໗໙] ຣາຄະທັງມວນເຮົາກໍລະໄດ້ແລ້ວ
ໂທສະທັງມວນເຮົາກໍຖອນໄດ້ແລ້ວ
ໂມຫະທັງມວນຂອງເຮົາກໍຫາຍໄປແລ້ວ
ເຮົາຈຶ່ງເປັນຜູ້ເຢັນດັບສະນິດແລ້ວ

# ໑໐. ອຸກຄະເຖຣະຄາຖາ

## ພາສິດຂອງພຣະອຸກຄະເຖຣະ

ຮູ້ວ່າ ທ່ານພຣະອຸກຄະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໗໐] ກຳທີ່ເຮົາໄດ້ເຮັດແລ້ວ
ຈະໜ້ອຍຫຼືຫຼາຍກໍຕາມ
ທັງມວນນັ້ນສິ້ນສຸດລົງແລ້ວ
ບັດນີ້ ບໍ່ມີການເກີດອີກ

**ອັດຖະມະວັກ ຈົບ**

## ລວມເລື້ອງພຣະເຖຣະທີ່ມີໃນວັກນີ້ ຄື

໑. ພຣະວັດສະປາລະເຖຣະ
໒. ພຣະມານະວະເຖຣະ
໓. ພຣະສຸສາຣະທະເຖຣະ
໔. ພຣະທັດຖາໂຣຫະບຸດເຖຣະ
໕. ພຣະຣັກຂິຕະເຖຣະ
໖. ພຣະອາຕຸມະເຖຣະ
໗. ພຣະສຸຍາມະນະເຖຣະ
໘. ພຣະປິຍັນຊະນະເຖຣະ
໙. ພຣະເມນທະສິຣະເຖຣະ
໑໐. ພຣະອຸກຄະເຖຣະ

# ໙. ນະວະມະວັກ

## ໝວດທີ ໙

# ໑. ສະມິຕິគຸດຕະເຖຣະຄາຖາ

## ພາສິດຂອງພຣະສະມິຕິគຸດຕະເຖຣະ

ຮູ້ວ່າ ທ່ານພຣະສະມິຕິគຸດຕະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໗໑] ເຮົາໄດ້ສະເຫວີຍບາບກຳທີ່ເຮົາເຮັດເອົາໄວ້
ໃນຊາດອື່ນ ໆ ໃນປາງກ່ອນ ໃນອັດຕະພາບນີ້ເອງ
ເລື້ອງບາບກຳອື່ນຈະບໍ່ມີອີກຕໍ່ໄປ

## ໔. ກັດສະປະເຖຣະຄາຖາ

### ພາສິດຂອງມານດາກ່າວກັບພຣະກັດສະປະເຖຣະ

ຮູ້ວ່າ ມານດາຂອງທ່ານພຣະກັດສະປະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໗໔] ລູກເອີຍ ໃນທິດໃດ ໆ ອາຫານຫາງ່າຍ
ຂາດພະຍາດແລະປາສະຈາກໄພ ຈົ່ງໄປໃນທິດນັ້ນ ໆ ເທີ້ນ
ຂໍເຈົ້າຢ່າໄດ້ປະສົບຄວາມໂສກເສົ້າເລີຍ

## ໓. ສີຫະເຖຣະຄາຖາ

### ພາສິດຂອງພຣະສາດສະດາທີ່ຕັດສອນພຣະສີຫະເຖຣະ

ຮູ້ວ່າ ພຣະສາດສະດາຊົງມີພຸດທະດຳຣັດສອນທ່ານພຣະສີຫະເຖຣະແນວນີ້ວ່າ

[໗໓] ສີຫະ ທ່ານຢ່າຜະໝາດຢູ່ເລີຍ
ຢ່າຂີ້ຄ້ານທັງກາງເວັນແລະກາງຄືນ
ຈົ່ງພ່ຳເພັງກຸສົນທຳ
ລະສັນທະຣາຄະໃນອັດຕະພາບສາໃຫ້ໄດ້ໂດຍທັນທີເທີ້ນ

## ໔. ນິຕະເຖຣະຄາຖາ

### ພາສິດຂອງພຣະສາດສະດາທີ່ຕັດສອນພຣະນິຕະເຖຣະ

ຮູ້ວ່າ ພຣະສາດສະດາເມື່ອຈະປະທານໂອວາດແກ່ທ່ານພຣະນິຕະເຖຣະໄດ້ຕັດພຣະຄາຖາໄວ້ດັ່ງນີ້ວ່າ

[໗໔] ຄົນຊາມປັນຍາ ເອົາແຕ່ນອນທັງຄືນ
ມັກມົ່ວສຸມກັບໝູ່ພວກທັງມື້
ເມື່ອໃດຈຶ່ງຈະສິ້ນທຸກໄດ້

## ໕. ສຸນາຄະເຖຣະຄາຖາ

### ພາສິດຂອງພຣະສຸນາຄະເຖຣະ

ຮູ້ວ່າ ທ່ານພຣະສຸນາຄະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໗໕] ຜູ້ສະຫຼາດໃນນິມິດແຫ່ງຈິດ ຮູ້ຣົດແຫ່ງວິເວກ
ເພ່ງພິນິດຢູ່ ສະຫຼາດໃນການບໍລິຫານກຳມະຖານ ມີສະຕິຕັ້ງໝັ້ນ
ເພື່ງບັນລຸນິຣາມິດສຸກ໌ໄດ້

## ໖. ນາຄິຕະເຖຣະຄາຖາ

### ພາສິດຂອງພຣະນາຄິຕະເຖຣະ

ຮູ້ວ່າ ທ່ານພຣະນາຄິຕະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໗໖] ທາງແຫ່ງລັດທິອື່ນ ໆ ນອກຈາກພຣະພຸດທະສາດສະໜານີ້
ບໍ່ແມ່ນທາງດຳເນີນໄປສູ່ນິບພານ ຄືອະຣິຍະມັກນີ້ເລີຍ
ພຣະຜູ້ມີພຣະພາກເຈົ້າຜູ້ເປັນພຣະບໍຣົມມະຄູ
ຊົງສັ່ງສອນພິກຂຸສົງໄວ້ເອງໂດຍປະການຢ່າງນີ້
ຄືຊົງຊີ້ໃຫ້ເຫັນໝາກຂາມປ້ອມທີ່ຝາພຣະຫັດ

## ໗. ປະວິດຖະເຖຣະຄາຖາ

### ພາສິດຂອງພຣະປະວິດຖະເຖຣະ

ຮູ້ວ່າ ທ່ານພຣະປະວິດຖະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໗໗] ຂັນ ໕ ເຮົາເຫັນແລ້ວຕາມຄວາມເປັນຈິງ
ພົບທັງປວງເຮົາທຳລາຍໄດ້ແລ້ວ
ການວຽນວ່າຍຕາຍເກີດກໍສິ້ນໄປແລ້ວ
ບັດນີ້ ບໍ່ມີການເກີດອີກ

## ໘. ອັດຊຸນະເຖຣະຄາຖາ

### ພາສິດຂອງພຣະອັດຊຸນະເຖຣະ

ຮູ້ວ່າ ທ່ານພຣະອັດຊຸນະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໗໘] ເຮົາສາມາດຍົກຕົນຈາກແມ່ນ້ຳໃຫຍ່ຄືສົງສານ ຂຶ້ນສູ່ບົກຄືນິບພານໄດ້ ຄືຄົນທີ່ຖືກພັດພາໄປໃນແມ່ນ້ຳໃຫຍ່ຊ່ອຍຂຶ້ນຝັ່ງໄດ້

ເຮົາໄດ້ຮູ້ແຈ້ງຕະຫຼອດອະຣິຍະສັດ ໔ ແລ້ວ

## ໙. (ປະຖົມ) ເທວະສະພະເຖຣະຄາຖາ

### ພາສິດຂອງພຣະ(ປະຖົມ)ເທວະສະພະເຖຣະ

ຮູ້ວ່າ ທ່ານພຣະ (ປະຖົມ) ເທວະສະພະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໗໙] ເຮົາຂ້າມພົ້ນການຣາຄະຄືເປືອກຕົມ
ແລະສັນທະຣາຄະຄືຫຼົ່ມມາໄດ້ແລ້ວ
ເຮົາລະທິດຖິເໝືອນບາດານໄດ້ຂາດແລ້ວ
ເຮົາພົ້ນຈາກໂອຄະແລະກິເລດເຄື່ອງຮ້ອຍຮັດທັງຫຼາຍໄດ້ແລ້ວ
ແລະມານະທັງມວນເຮົາກຳຈັດໄດ້ແລ້ວ

## ໑໐. ສາມິທັດຕະເຖຣະຄາຖາ

### ພາສິດຂອງພຣະສາມິທັດຕະເຖຣະ

ຮູ້ວ່າ ທ່ານພຣະສາມິທັດຕະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໙໐] ຂັນ ໕ ເຮົາກຳນົດຮູ້ແລ້ວ
ຂັນເຫຼົ່ານັ້ນດຳລົງຢູ່ຢ່າງຖືກຕັດຮາກກົ່ນເຫງົ້າແລ້ວ
ການວຽນວ່າຍຕາຍເກີດສິ້ນໄປແລ້ວ
ບັດນີ້ບໍ່ມີການເກີດອີກ

**ນະວະມະວັກ ຈົບ**

### ລວມເລື້ອງພຣະເຖຣະທີ່ມີໃນວັກນີ້ ຄື

໑. ພຣະສະມິຕິຄຸດຕະເຖຣະ
໒. ພຣະສີຫະເຖຣະ
໕. ພຣະສຸນາຄະເຖຣະ
໗. ພຣະປະວິດຖະເຖຣະ
໙. ພຣະ(ປະຖົມ)ເທວະສະພະເຖຣະ
໔. ພຣະກັດສະປະເຖຣະ
໔. ພຣະນິຕະເຖຣະ
໖. ພຣະນາຄິຕະເຖຣະ
໘. ພຣະອັດຊຸນະເຖຣະ
໑໐. ພຣະສາມິທັດຕະເຖຣະ

# ໑໐. ທະສະມະວັກ

## ໝວດທີ ໑໐

## ໑. ປະຣິປຸນນະກະເຖຣະຄາຖາ

### ພາສິດຂອງພຣະປະຣິປຸນນະເຖຣະ

ຮູ້ວ່າ ທ່ານພຣະປະຣິປຸນນະກະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໗໑] ສຸທາໂພດ[๑]ມີຣົດນັບຮ້ອຍທີ່ເຮົາບໍຣິໂພກແລ້ວ
ຍັງບໍ່ທຽບທໍ່ນິບພານສຸກທີ່ເຮົາໄດ້ບັນລຸໃນມື້ນີ້
ຍ້ອນນິບພານທຳນັ້ນ
ເປັນທຳອັນພຣະໂຄດົມສຳມາສຳພຸດທະເຈົ້າ
ຜູ້ຊົງເຫັນນິບພານອັນອັນໃດກຳນົດບໍ່ໄດ້ຊົງສະແດງໄວ້ແລ້ວ

## ໒. ວິຊະຍະເຖຣະຄາຖາ

### ພາສິດຂອງພຣະວິຊະຍະເຖຣະ

ຮູ້ວ່າ ທ່ານພຣະວິຊະຍະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໗໒] ທ່ານຜູ້ສິ້ນອາສະວະແລ້ວ ບໍ່ຕິດໃນອາຫານ
ມີສູນຍະຕະວິໂມກ[๑] ອະນິມິດຕະວິໂມກ[๒]
ແລະອັບປະນິຫິຕະວິໂມກ[๓] ທັງ ໓ ເປັນອາລົມ
ບໍ່ຖິ້ມຮ່ອງຮອຍໄວ້ໃຫ້ເປັນທີ່ຮູ້ໄດ້
ຄືນົກບໍ່ຖິ້ມຮ່ອງຮອຍ ໄວ້ໃນອາກາດ

## ໓. ເອຣະກະເຖຣະຄາຖາ

### ພາສິດຂອງພຣະເອຣະກະເຖຣະ

ຮູ້ວ່າ ທ່ານພຣະເອຣະກະເຖຣະໄດ້ກ່າວຊ້ຳຄາຖາທີ່ພຣະຜູ້ມີພຣະພາກເຈົ້າຕັດແລ້ວນັ້ນແລ ດັ່ງນີ້ວ່າ

[໗໓] ເອຣະກະ ກາມມີແຕ່ທຸກ ກາມບໍ່ມີສຸກເລີຍ
ຜູ້ທີ່ຍິນດີໃນກາມ ຊື່ວ່າໃຝ່ທຸກ
ຜູ້ທີ່ບໍ່ຍິນດີໃນກາມ ຊື່ວ່າບໍ່ໃຝ່ທຸກ

# ໔. ເມດຕະຊິເຖຣະຄາຖາ

## ພາສິດຂອງພຣະເມດຕະຊິເຖຣະ

ຮູ້ວ່າ ທ່ານພຣະເມດຕະຊິເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໗໔] ຂ້ານ້ອຍຂໍນອບນ້ອມແດ່
ພຣະຜູ້ມີພຣະພາກເຈົ້າສາກະຍະບຸດ
ຜູ້ຊົງພຣະສິຣິພຣະອົງນັ້ນ
ພຣະອົງຜູ້ຊົງບັນລຸສັບພັນຍຸຕະຍານອັນເລີດ
ຊົງສະແດງນະວະໂລກຸດຕະຣະທຳ໌ອັນເລີດນີ້ໄວ້ເປັນຢ່າງດີ

# ໕. ຈັກຂຸປາລະເຖຣະຄາຖາ

## ພາສິດຂອງພຣະຈັກຂຸບານເຖຣະ

ຮູ້ວ່າ ທ່ານພຣະຈັກຂຸບານເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໗໕] ເຮົາມີໜ່ວຍຕາພິການ ຕາບອດ
ເດີນທາງໄກທຸຣະກັນດານ
ເຖິງຈະຕ້ອງນອນເກືອກກິ້ງຢູ່ເທິງພື້ນດິນ
ກໍຈະບໍ່ຮ່ວມທາງໄປກັບຄົນຊົ່ວຊ້າ

# ໖. ຂັນທະສຸມະນະເຖຣະຄາຖາ

## ພາສິດຂອງພຣະຂັນທະສຸມະນະເຖຣະ

ຮູ້ວ່າ ທ່ານພຣະຂັນທະສຸມະນະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໗໖] ຍ້ອນບໍລິຈາກດອກໄມ້ດອກດຽວແທ້ ໆ
ເຮົາຈຶ່ງຮັບການປິ່ນເປີຢູ່ໃນແດນສະຫວັນເຖິງ ໘໐໐ ລ້ານປີ
ດ້ວຍເສດກຸສົນທຳແຫ່ງການບໍລິຈາກນັ້ນ
ໄດ້ບັນລຸນິບພານແລ້ວ

## ໗. ຕິດສະເຖຣະຄາຖາ

### ພາສິດຂອງພຣະຕິດສະເຖຣະ

ຮູ້ວ່າ ທ່ານພຣະຕິດສະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໙໗] ເຮົາລະຖິ້ມຈານຄຳລວດລາຍວິຈິດ
ມີຄ່ານັບຮ້ອຍປະລະໆມາໃຊ້ບາດດິນແທນ
ນີ້ເປັນການອະພິເສກຄັ້ງທີ ໒

## ໘. ອະໄພເຖຣະຄາຖາ

### ພາສິດຂອງພຣະອະໄພເຖຣະ

ຮູ້ວ່າ ທ່ານພຣະອະໄພເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໙໘] ເມື່ອເຫັນຮູບ ມົວໃສ່ໃຈເຖິງອາລົມອັນເປັນທີ່ຮັກຢູ່
ຍ່ອມຫຼົງລືມສະຕິໄດ້ ຜູ້ທີ່ມີຈິດກຳໜັດຫຼາຍ ຍັງສະເຫວີຍຮູບອາຣົມຢູ່
ຮູບອາຣົມນັ້ນຍ່ອມຜູກພັນເຂົາໄວ້
ແລະອາສະວະທັງຫຼາຍຍ່ອມຈະເລີນແກ່ເຂົາຜູ້ເຂົ້າເຖິງມູນແຫ່ງພົບ

## ໙. ອຸດຕິຍະເຖຣະຄາຖາ

### ພາສິດຂອງພຣະອຸດຕິຍະເຖຣະ

ຮູ້ວ່າ ທ່ານພຣະອຸດຕິຍະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໙໙] ເມື່ອບຸກຄົນຟັງສຽງແລ້ວ ມົວໃສ່ໃຈເຖິງອາລົມອັນເປັນທີ່ຮັກຢູ່
ຍ່ອມຫຼົງລືມສະຕິໄດ້
ຜູ້ທີ່ມີຈິດກຳໜັດຫຼາຍຍັງສະເຫວີຍສັດທາຣົມຢູ່
ສັດທາຣົມນັ້ນຍ່ອມຜູກພັນເຂົາໄວ້
ແລະອາສະວະທັງຫຼາຍຍ່ອມຈະເລີນແກ່ເຂົາຜູ້ເຂົ້າເຖິງສັງສາຣະວັດ

## ໑໐. (ທຸຕິຍະ) ເທວະສະພະເຖຣະຄາຖາ

### ພາສິດຂອງພຣະ(ທຸຕິຍະ)ເທວະສະພະເຖຣະ

ຮູ້ວ່າ ທ່ານພຣະ (ທຸຕິຍະ) ເທວະສະພະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[๑๐๐] ພິກຂຸຜູ້ເຖິງພ້ອມດ້ວຍຄວາມພຽນຖືກ
ມີສະຕິປັດຖານເປັນອາລົມ[๑]
ທັງປະດັບປະດາດ້ວຍດອກໄມ້ຄືວິມຸດຕິ
ບໍ່ຊ້າເລີຍ ຈະເປັນຜູ້ໝົດອາສະວະ ປະຣິນິບພານ

**ທະສະມະວັກ ຈົບ**

## ລວມເລື້ອງພຣະເຖຣະທີ່ມີໃນວັກນີ້ ຄື

๑. ພຣະປະຣິປຸນນະກະເຖຣະ
๒. ພຣະເອຣະກະເຖຣະ
๓. ພຣະຈັກຂຸປາລະເຖຣະ
๔. ພຣະຕິດສະເຖຣະ
๕. ພຣະອຸດຕິຍະເຖຣະ
๖. ພຣະວິຊະຍະເຖຣະ
๗. ພຣະເມດຕະຊິເຖຣະ
๘. ພຣະຂັນທະສຸມະນະເຖຣະ
๙. ພຣະອະໄພເຖຣະ
๑๐. ພຣະ(ທຸຕິຍະ)ເທວະສະພະເຖຣະ

# ເອກາທະສະມະວັກ

## ໝວດທີ ๑๑

## ๑. ເພລັດຖະການິເຖຣະຄາຖາ

### ພາສິດຂອງພຣະເພລັດຖະການິເຖຣະ

ຮູ້ວ່າ ທ່ານພຣະເພລັດຖະການິເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[๑๐๑] ທ່ານລະເພດຄະລືຫັດມາບວດແລ້ວ ຍັງບໍ່ທັນສຳເລັດກິດເລີຍ
ກໍມີປາກບໍ່ຂອບຄືໄຖ ເຫັນແກ່ປາກແກ່ທ້ອງ ທັງຂີ້ຄ້ານ
ຊຶມເຊົາ ຄືໝູອ້ວນທີ່ເຂົາຂຸນດ້ວຍເສດອາຫານ
ຍ່ອມເຂົ້າເຖິງການເກີດຢູ່ສະເໝີ ໆ

## ๒. ເສຕຸດສະເຖຣະຄາຖາ

### ພາສິດຂອງພຣະເສຕຸດສະເຖຣະ

ຮູ້ວ່າ ທ່ານພຣະເສຕຸດສະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໑໐໘] ຊົນທັງຫຼາຍທີ່ຍັງຖືກມານະຫຼອກລວງ
ເສົ້າໝອງໃນສັງຂານທັງຫຼາຍ
ຖືກລາບແລະຄວາມເສື່ອມລາບຄອບງຳໄດ້
ຍ່ອມບັນລຸສະມາທິບໍ່ໄດ້

## ໓. ພັນທຸຣະເຖຣະຄາຖາ

### ພາສິດຂອງພຣະພັນທຸຣະເຖຣະ

ຮູ້ວ່າ ທ່ານພຣະພັນທຸຣະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໑໐໓] ລາບຄືອາມິດນັ້ນເຮົາບໍ່ຕ້ອງການ
ເຮົາມີຄວາມສຸກພໍແລ້ວ ອີ່ມເອີບດ້ວຍຣົດພຣະທຳ
ເມື່ອໄດ້ດື່ມຣົດອັນລ້ຳເລີດແລ້ວ
ກໍຈະບໍ່ຂໍເຮັດຄວາມໃກ້ຊິດກັບຣົດແນວອື່ນທີ່ເປັນພິດ

## ໔. ຂິຕະກະເຖຣະຄາຖາ

### ພາສິດຂອງພຣະຂິຕະກະເຖຣະ

ຮູ້ວ່າ ທ່ານພຣະຂິຕະກະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໑໐໔] ກາຍຂອງເຮົາທີ່ໄດ້ສຳຜັດກັບສຸກອັນມີປິຕິຫຼາຍ
ເປັນກາຍເບົານໍ ຍ່ອມລອຍໄປໄດ້ຄືປຸຍນຸ່ນທີ່ປິວໄປຕາມລົມ

## ໕. ມະລິຕະວຳພະເຖຣະຄາຖາ

### ພາສິດຂອງພຣະມະລິຕະວຳພະເຖຣະ

ຮູ້ວ່າ ທ່ານພຣະມະລິຕະວຳພະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໑໐໕] ເຮົາເກີດກະສັນຂຶ້ນໃນບ່ອນໃດ ຈະບໍ່ຢູ່ໃນບ່ອນນັ້ນ
ເຖິງຈະຍິນດີແນວນັ້ນ ກໍເພິ່ງຫຼີກໄປສາ
ສ່ວນຜູ້ມີປັນຍາບໍ່ເພິ່ງຢູ່ປະຈຳສະຖານທີ່ທີ່ບໍ່ປະກອບດ້ວຍປະໂຫຍດເລີຍ

## ๖. ສຸເຫມັນຕະເຖຣະຄາຖາ

### ພາສິດຂອງພຣະສຸເຫມັນຕະເຖຣະ

ຮູ້ວ່າ ທ່ານພຣະສຸເຫມັນຕະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໑໐໖] ເນື້ອຄວາມທີ່ມີຄວາມໝາຍຕັ້ງຮ້ອຍ ມີລັກສະນະເຖິງຮ້ອຍ
ຄົນໂງ່ເຫັນໄດ້ລັກສະນະດຽວເທົ່ານັ້ນ ສ່ວນຄົນສະຫຼາດເຫັນໄດ້ທັງຮ້ອຍແນວ

## ໗. ທໍາມະສັງວອນເຖຣະຄາຖາ

### ພາສິດຂອງພຣະທໍາສັງວອນເຖຣະ

ຮູ້ວ່າ ທ່ານພຣະທໍາມະສັງວອນເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໑໐໗] ເຮົາໃຊ້ປັນຍາພິຈາລະນາແລ້ວ
ຈຶ່ງອອກຈາກເຮືອນບວດ ບັນລຸວິດຊາ ๓
ໄດ້ເຮັດຕາມຄໍາສັ່ງສອນຂອງພຣະພຸດທະເຈົ້າແລ້ວ

## ໘. ທໍາມະສະຕະປິຕຸເຖຣະຄາຖາ

### ພາສິດຂອງພຣະທໍາມະສະຕະປິຕຸເຖຣະ

ຮູ້ວ່າ ທ່ານພຣະທໍາມະສະຕະປິຕຸເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໑໐໘] ເຮົານັ້ນອາຍຸໄດ້ ໑໒໐ ປີ
ຈຶ່ງໄດ້ອອກບວດເປັນບັນພະຊິດ ບັນລຸວິດຊາ ๓
ໄດ້ເຮັດຕາມຄໍາສັ່ງສອນຂອງພຣະພຸດທະເຈົ້າແລ້ວ

## ໙. ສັງຄະຣັກຂິຕະເຖຣະຄາຖາ

### ພາສິດຂອງພຣະສັງຄະຣັກຂິຕະເຖຣະ

ຮູ້ວ່າ ທ່ານພຣະສັງຄະຣັກຂິຕະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໑໐໙] ພິກຂຸຜູ້ຢູ່ໃນບ່ອນສະງັດອົງນີ້ເຫັນຈະບໍ່ຄໍານຶງເຖິງ

ຄຳສອນຂອງພຣະຜູ້ມີພຣະພາກເຈົ້າ
ຜູ້ຊົງອະນຸເຄາະສັດໂລກດ້ວຍປະໂຫຍດສູງສຸດເປັນແນ່
ຍ້ອນເຫດນັ້ນແລ ຈຶ່ງບໍ່ສັງລວມອິນຊີຢູ່
ຄືແມ່ເນື້ອລູກອ່ອນໃນປ່າ

## ໑໐. ອຸສະພະເຖຣະຄາຖາ

### ພາສິດຂອງພຣະອຸສະພະເຖຣະ

ຮູ້ວ່າ ທ່ານພຣະອຸສະພະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໑໑໐] ພືກສະຊາດທັງຫຼາຍເທິງຈອມພູທີ່ຝົນຕົກໃສ່ໃໝ່ ໆ
ງອກງາມເຕັມທີ່ແລ້ວ ຍ່ອມໃຫ້ເກີດພາວະທີ່ຈິດ
ຄວນແກ່ພາວະນາເພີ່ມຂຶ້ນແກ່ເຮົາຜູ້ຊື່ວ່າ ອຸສະພະ
ທີ່ຍັງຕ້ອງການຄວາມສະຫງັດ ເຫັນຄວາມສຳຄັນໃນປ່າ

**ເອກາທະສະມະວັກ ຈົບ**

## ລວມເລື້ອງພຣະເຖຣະທີ່ມີໃນວັກນີ້ ຄື

໑. ພຣະເພລັດຖະການິເຖຣະ
໒. ພຣະພັນທຸຣະເຖຣະ
໓. ພຣະມະລິຕະວຳພະເຖຣະ
໔. ພຣະທຳສັງວອນເຖຣະ
໕. ພຣະສັງຄະຣັກຂິຕະເຖຣະ
໖. ພຣະເສຕຸດສະເຖຣະ
໗. ພຣະຂິຕະກະເຖຣະ
໘. ພຣະສຸເຫມັນຕະເຖຣະ
໙. ພຣະທຳສະຕະປິຕຸເຖຣະ
໑໐. ພຣະອຸສະພະເຖຣະ

# ໑໘. ທະວາທະສະນະວັກ

## ໝວດທີ ໑໘

## ໑. ເຊນະຕະເຖຣະຄາຖາ

### ພາສິດຂອງພຣະເຊນຕະເຖຣະ

ຮູ້ວ່າ ທ່ານພຣະເຊນຕະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໑໑໑] ການບວດເປັນຂອງຍາກແທ້
ເຮືອນມີການຢູ່ຄອງໄດ້ຍາກ
ທຳກໍເລີກເຊິ່ງ ໂພຄະທັງຫຼາຍກໍຫາໄດ້ຍາກ
ການເປັນຢູ່ຂອງພວກເຮົາຕາມມີຕາມໄດ້ກໍຝືດເຄືອງ
ດັ່ງນັ້ນ ຈຶ່ງຄວນທີ່ຈະຄິດເຖິງຄວາມບໍ່ແນ່ນອນຢູ່ສະເໝີ

## ໒. ວັດສະໂຄດຕະເຖຣະຄາຖາ

### ພາສິດຂອງພຣະວັດສະໂຄດຕະເຖຣະ

ຮູ້ວ່າ ພຣະວັດສະໂຄດຕະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໑໑໒] ເຮົາເຊິ່ງໄດ້ວິດຊາ ໓ ມັກເພ່ງເຖິງນິບພານອັນເປັນທຳປະນີດ
ສະຫຼາດໃນອຸບາຍສຳລັບສະງົບໃຈ
ໄດ້ບັນລຸປະໂຫຍດຕົນ
ໄດ້ເຮັດຕາມຄຳສັ່ງສອນຂອງພຣະພຸດທະເຈົ້າແລ້ວ

## ໓. ວະນະວັດສະເຖຣະຄາຖາ

### ພາສິດຂອງພຣະວະນະວັດສະເຖຣະ

ຮູ້ວ່າ ທ່ານພຣະວະນະວັດສະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໑໑໓] ພູຫີນອັນກວ້າງໃຫຍ່ໄພສານ
ມີນ້ຳໄຫຼໃສສະອາດ
ມີຝູງຄ່າງແລະຝູງໂຕຟານຈຳນວນຫຼາຍ

ເດຍລະດາດໄປດ້ວຍນ້ຳແລະສາຫຣ່າຍເຫຼົ່ານັ້ນ
ຍ່ອມເຮັດໃຫ້ເຮົາອອນຊອນໃຈຍິ່ງ

## ໔. ອະທິມຸດຕະເຖຣະຄາຖາ

### ພາສິດຂອງພຣະອະທິມຸດຕະເຖຣະ

ຮູ້ວ່າ ທ່ານພຣະອະທິມຸດຕະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໑໑໔] ພິກຂຸຜູ້ຂົນຂວາຍໃນການບຳລຸງຮ່າງກາຍ
ຍັງຕິດສຸກຢູ່ທາງຮ່າງກາຍ
ເມື່ອສິ້ນຊີວິດໂດຍທັນທີ
ຈະມີຄວາມເປັນສະມະນະທີ່ດີໄດ້ຢູ່ໄສ

## ໕. ມະຫານາມະເຖຣະຄາຖາ

### ພາສິດຂອງພຣະມະຫານາມະເຖຣະ

ຮູ້ວ່າ ທ່ານພຣະມະຫານາມະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໑໑໕] (ມະຫານາມະ)ທ່ານນີ້ກຳລັງຈະເສື່ອມປະໂຫຍດຍ້ອນພູເນສາທະກະ ອັນຫຼາຍໄປດ້ວຍໝູ່ຕົ້ນໂມກມັນແລະຕົ້ນອ້ອຍຊ້າງ
ເປັນພູທີ່ສົມບູນດ້ວຍຮົ່ມເງົາແລະນ້ຳ
ປົກຄຸມໄປດ້ວຍພຸ່ມໄມ້ແລະເຄືອເຂົານານາພັນ

## ໖. ປາຣາປະຣິຍະເຖຣະຄາຖາ

### ພາສິດຂອງພຣະປາຣາປະຣິຍະເຖຣະ

ຮູ້ວ່າ ທ່ານພຣະປາຣາປະຣິຍະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໑໑໖] ເຮົາລະຜັດສາຍະຕະນະ ໖ ໄດ້ແລ້ວ
ຄຸ້ມຄອງສັງລວມລະວັງທະວານ ໖ ດ້ວຍດີ
ກຳຈັດສັບພະກິເລດອັນເປັນມູນຮາກແຫ່ງວັດຕະທຸກໄດ້ໝົດແລ້ວ
ຈຶ່ງໝົດສິ້ນອາສະວະ

## ໗. ຍະສະເຖຣະຄາຖາ

### ພາສິດຂອງພຣະຍະສະເຖຣະ

ຮູ້ວ່າ ທ່ານພຣະຍະສະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໑໑໗] ເຮົາລູບທາດີແລ້ວ ນຸ່ງຫົ່ມດີແລ້ວ
ປະດັບດ້ວຍເຄື່ອງອາພອນທຸກຊະນິດ
ບັນລຸວິດຊາ ໓
ໄດ້ເຮັດຕາມຄຳສັ່ງສອນຂອງພຣະພຸດທະເຈົ້າແລ້ວ

## ໘. ກິມພິລະເຖຣະຄາຖາ

### ພາສິດຂອງພຣະກິມພິລະເຖຣະ

ຮູ້ວ່າ ທ່ານພຣະກິມພິລະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໑໑໘] ໄວຍ່ອມຫາຍໄປໄວເກີນໄປ
ຮູບທີ່ເປັນຢູ່ຢ່າງນັ້ນຍ່ອມຜາກົດແກ່ເຮົາ ຄືກັບສິ່ງອື່ນ ໆ
ເຮົາຣະນຶກເຖິງຮ່າງກາຍຂອງເຮົາຜູ້ຢູ່ບໍ່ປາສະຈາກສະຕິ
ຄືກັບຮ່າງກາຍຂອງຜູ້ອື່ນ

## ໙. ວັດຊີປຸດຕະເຖຣະຄາຖາ

### ພາສິດຂອງພຣະວັດຊີບຸດເຖຣະ

ຮູ້ວ່າ ທ່ານພຣະວັດຊີບຸດເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໑໑໙] ທ່ານພຣະອານົນໂຄຕະມະໂຄດ ທ່ານຈົ່ງເຂົ້າໄປສູ່ສຸມທຸມພຸ່ມໄມ້
ກຳນົດນິບພານໄວ້ໃນໃຈ ເພ່ງຊານໄປເທີ້ນ ແລະຢ່າຜະໝາດ
ສຽງວິພາກວິຈານຂອງຄົນຈະຊ່ອຍອັນໃດທ່ານໄດ້

## ໑໐. ອິສິທັດຕະເຖຣະຄາຖາ

### ພາສິດຂອງພຣະອິສິທັດຕະເຖຣະ

ຮູ້ວ່າ ທ່ານພຣະອິສິທັດຕະເຖຣະໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ

[໑໔໐] ຂັນ ໕ ເຮົາກຳນົດຮູ້ແລ້ວ
ຂັນເຫຼົ່ານັ້ນດຳລົງຢູ່ຢ່າງຖືກຕັດຮາກກົ່ນເຫງົ້າແລ້ວ
ຄວາມສິ້ນທຸກເຮົາໄດ້ບັນລຸແລ້ວ
ເຮົາໄດ້ເຖິງຄວາມສິ້ນອາສະວະແລ້ວ

**ທະວາທະສະມະວັກ ຈົບ**

## ລວມເລື້ອງພຣະເຖຣະທີ່ມີໃນວັກນີ້ ຄື

໑. ພຣະເຂມຕະເຖຣະ
໒. ພຣະວະນະວັດສະເຖຣະ
໓. ພຣະມະຫານາມະເຖຣະ
໗. ພຣະຍະສະເຖຣະ
໕. ພຣະວັດຊິບຸດເຖຣະ
໔. ພຣະວັດສະໂຄດຕະເຖຣະ
໕. ພຣະອະທິມຸດຕະເຖຣະ
໖. ພຣະປາຣາປະຣິຍະເຖຣະ
໙. ພຣະກິມພິລະເຖຣະ
໑໐. ພຣະອິສິທັດຕະເຖຣະ

**ເອກກະນິບາດ ຈົບ**

## ລວມຫົວຂໍ້ທີ່ມີໃນເອກກະນິບາດ

ໃນເອກກະນິບາດນີ້ແລ ທ່ານຜູ້ຫວັງປະໂຫຍດສ່ວນໃຫຍ່ ຣິບໂຣມພຣະເຖຣະຜູ້ເຮັດກິດທີ່ຄວນເຮັດສຳເລັດແລ້ວ ຫາອາສະວະບໍ່ໄດ້ ໄດ້ ໑໔໐ ອົງ

# ๘. ທຸກະນິບາດ

# ໑. ປະຖົມວັກ

## ໝວດທີ ໑

## ໑. ອຸດຕະຣະເຖຣະຄາຖາ

### ພາສິດຂອງພຣະອຸດຕະຣະເຖຣະ

ຮູ້ວ່າ ທ່ານພຣະອຸດຕະຣະເຖຣະໄດ້ກ່າວ ໒ ຄາຖາໄວ້ດັ່ງນີ້ວ່າ

[໑໘໑] ພົບທີ່ທ່ຽງຈັກພົບກໍບໍ່ມີ ຫຼືແມ່ນສັງຂານທີ່ທ່ຽງກໍບໍ່ມີ
ຂັນເຫຼົ່ານັ້ນຍ່ອມວຽນເກີດແລະວຽນດັບໄປ

[໑໘໒] ເຮົາຮູ້ໂທດແນວນີ້ແລ້ວ ຈຶ່ງບໍ່ມີຄວາມຕ້ອງການພົບ
ສະລັດອອກຈາກການທຸກຢ່າງ ໄດ້ເຖິງຄວາມສິ້ນອາສະວະແລ້ວ

## ໒. ປິນໂທລະພາຣະທະວາຊະເຖຣະຄາຖາ

### ພາສິດຂອງພຣະປິນໂທລະພາຣະທະວາຊະເຖຣະ

ຮູ້ວ່າ ທ່ານພຣະປິນໂທລະພາຣະທະວາຊະເຖຣະໄດ້ກ່າວ ໒ ຄາຖາໄວ້ດັ່ງນີ້ວ່າ

[໑໘໓] ຊີວິດຂອງເຮົານີ້ ບໍ່ແມ່ນເປັນໄປໂດຍບໍ່ສົມຄວນ
ອາຫານເຮັດໃຈໃຫ້ສະງົບບໍ່ໄດ້
ແຕ່ເຮົາເຫັນວ່າຮ່າງກາຍດຳລົງຢູ່ໄດ້ຍ້ອນອາຫານ
ຈຶ່ງໄດ້ທ່ຽວສະແຫວງຫາອາຫານໂດຍທາງທີ່ຖືກ

[໑໘໔] ດ້ວຍວ່າ ນັກປາດມີພຣະພຸດທະເຈົ້າເປັນຕົ້ນ
ໄດ້ກ່າວການໄຫວ້ ແລະການບູຊາໃນຕະກູນທັງຫຼາຍວ່າ
ເປັນເປືອກຕົມ ເປັນລູກສອນອັນລະອຽດເຊິ່ງຖອນຂຶ້ນໄດ້ຍາກ
ເປັນສັກກາຣະທີ່ຄົນຊົ່ວລະໄດ້ຍາກ

# ๓. ວັນລິຍະເຖຣະຄາຖາ

## ພາສິດຂອງພຣະວັນລິຍະເຖຣະ

(ພຣະວັນລິຍະເຖຣະເມື່ອຈະພະຍາກອນພຣະອະຣະຫັດ ຈຶ່ງໄດ້ກ່າວ ໒ ຄາຖາໄວ້ດັ່ງນີ້ວ່າ)

[໑໒໕] ລີງເຂົ້າໄປໃນຕູບມີ ໕ ປະຕູ
ພະຍາຍາມວຽນເຂົ້າອອກທາງປະຕູເນືອງ ໆ

[໑໒໖] ຈົ່ງຢຸດນິດ ຢ່າແລ່ນໄປເດີ້ລີງ
ຍ້ອນເຈົ້າອາໄສເຮືອນຄືອັດຕະພາບບໍ່ໄດ້ ຄືດັ່ງການກ່ອນ
ເຈົ້າຖືກເຮົາຂົ່ມໄວ້ດ້ວຍປັນຍາແລ້ວ ຈັກໄປໄກບໍ່ໄດ້ເລີຍ

# ໔. ຄັງຄາຕີຣິຍະເຖຣະຄາຖາ

## ພາສິດຂອງພຣະຄັງຄາຕີຣິຍະເຖຣະ

(ພຣະຄັງຄາຕີຣິຍະເຖຣະເມື່ອຈະພະຍາກອນພຣະອະຣະຫັດ ຈຶ່ງໄດ້ກ່າວ ໒ ຄາຖາໄວ້ດັ່ງນີ້ວ່າ)

[໑໒໗] ເຮົາສ້າງຕູບດ້ວຍໃບຕານ ໓ ໃບ ຢູ່ທີ່ແຄມຝັ່ງແມ່ນ້ຳຄົງຄາ
ບາດຂອງເຮົາຄືໝໍ້ສຳລັບຕັກນ້ຳນົມທິດສົບ
ແລະຈີວອນຂອງເຮົາເປັນຜ້າບັງສຸກຸນ

[໑໒໘] ໃນລະຫວ່າງ ໒ ພັນສາ ເຮົາເວົ້າພຽງຄຳດຽວ
ລະຫວ່າງພັນສາທີ ໓ ເຮົາທຳລາຍກອງຄວາມມືດໄດ້ແລ້ວ[๑]

# ໕. ອະຊິນະເຖຣະຄາຖາ

## ພາສິດຂອງພຣະອະຊິນະເຖຣະ

(ພຣະອະຊິນະເຖຣະເມື່ອຈະໃຫ້ພິກຂຸທັງຫຼາຍສັງເວດ ຈຶ່ງໄດ້ກ່າວ ໒ ຄາຖາໄວ້ດັ່ງນີ້ວ່າ)

[໑໒໙] ເຖິງແມ່ນວ່າບຸກຄົນຈະມີວິດຊາ ໓ ລະມັດຈຸຣາດໄດ້ ບໍ່ມີອາສະວະ
ຄົນພານທັງຫຼາຍທີ່ບໍ່ມີຄວາມຮູ້ຍ່ອມດູໝິ່ນບຸກຄົນນັ້ນວ່າ
ເປັນຜູ້ບໍ່ມີຊື່ສຽງ

[໑໓໐] ສ່ວນບຸກຄົນໃດໃນໂລກນີ້ເປັນຜູ້ມັກໄດ້ເຂົ້າແລະນ້ຳ
ເຖິງແມ່ນວ່າບຸກຄົນນັ້ນຈະເປັນຄົນຊົ່ວຊ້າເລວຊາມ
ກໍເປັນທີ່ສັກກາຣະນັບຖືຂອງພວກເຂົາ

## ຜ. ເມລະຊິນະເຖຣະຄາຖາ

### ພາສິດຂອງພຣະເມລະຊິນະເຖຣະ

(ພຣະເມລະຊິນະເຖຣະເມື່ອຈະບັນລືສີຫະນາດ ຈຶ່ງໄດ້ກ່າວ ໒ ຄາຖາໄວ້ດັ່ງນີ້ວ່າ)

[໑໓໑] ເມື່ອໃດ ເຮົາໄດ້ຟັງທຳຂອງພຣະສາດສະດາຜູ້ຊົງສະແດງຢູ່
ເມື່ອນັ້ນ ເຮົາຮູ້ທຳທັງປວງ
ຈຶ່ງບໍ່ຮູ້ສຶກສົງໄສໃນພຣະສາດສະດາທີ່ໃຜ ໆ ຊະນະບໍ່ໄດ້

[໑໓໒] ເຊິ່ງເປັນຜູ້ນຳໝູ່ ແກ່ກ້າຫຼວງຫຼາຍ
ປະເສີດເລີດກວ່າສາຣະຖີທັງຫຼາຍ
ເຮົາບໍ່ມີຄວາມສົງໄສໃນມັກຫຼືຂໍ້ປະຕິບັດ

## ກ. ຣາທະເຖຣະຄາຖາ

### ພາສິດຂອງພຣະຣາທະເຖຣະ

(ພຣະຣາທະເຖຣະເມື່ອຈະຊົມເຊີຍພາວະນາ ຈຶ່ງໄດ້ກ່າວ ໒ ຄາຖາໄວ້ດັ່ງນີ້ວ່າ)

[໑໓໓] ເຮືອນທີ່ມຸງບໍ່ດີ ຝົນຍ່ອມຮົ່ວຫົດໄດ້ ສັນໃດ
ຈິດທີ່ບໍ່ໄດ້ອົບຮົມ ຣາຄະຍ່ອມຮົ່ວຫົດໄດ້ ສັນນັ້ນ

[໑໓໔] ເຮືອນທີ່ມຸງດີແລ້ວ ຝົນຍ່ອມຮົ່ວຫົດບໍ່ໄດ້ ສັນໃດ
ຈິດທີ່ອົບຮົມດີແລ້ວ ຣາຄະກໍຮົ່ວຫົດບໍ່ໄດ້ ສັນນັ້ນ

## ຕຸ. ສຸຣາທະເຖຣະຄາຖາ

### ພາສິດຂອງພຣະສຸຣາທະເຖຣະ

(ພຣະສຸຣາທະເຖຣະເມື່ອຈະພະຍາກອນພຣະອະຣະຫັດ ຈຶ່ງໄດ້ກ່າວ ໒ ຄາຖາໄວ້ດັ່ງນີ້ວ່າ)

[໑໖໕] ດ້ວຍວ່າຊາດຂອງເຮົາສິ້ນໄປແລ້ວ
ຄຳສັ່ງສອນຂອງພຣະຊິນນະເຈົ້າເຮົາຢູ່ຈົບແລ້ວ
ທິດຖິແລະອະວິດຊາຄືຕາໜ່າງເຮົາລະໄດ້ແລ້ວ
ຕັນຫານຳໄປສູ່ພົບເຮົາກໍຖອນໄດ້ແລ້ວ

[໑໖໖] ເຮົາອອກຈາກເຮືອນບວດເປັນບັນພະຊິດເພື່ອປະໂຫຍດໃດ
ປະໂຫຍດນັ້ນເຮົາໄດ້ບັນລຸແລ້ວ
ຄວາມສິ້ນໄປແຫ່ງສັງໂຍດທັງປວງເຮົາກໍໄດ້ບັນລຸແລ້ວ

## ໙. ໂຄຕະມະເຖຣະຄາຖາ

### ພາສິດຂອງພຣະໂຄຕະມະເຖຣະ

(ພຣະໂຄຕະມະເຖຣະເມື່ອຈະພະຍາກອນພຣະອະຣະຫັດ ຈຶ່ງໄດ້ກ່າວ ໔ ຄາຖາໄວ້ດັ່ງນີ້ວ່າ)

[໑໖໗] ມຸນີທັງຫຼາຍຜູ້ບໍ່ພົວພັນໃນເຫຼົ່າສະຕີທັງຫຼາຍຍ່ອມນອນເປັນສຸກ
ເຫຼົ່າສະຕີທີ່ຫາສັດຈະໄດ້ຍາກແສນຍາກ
ບຸຣຸດຕ້ອງຄອຍຣະແວດລະວັງຢູ່ຕະຫຼອດເວລາ

[໑໖໘] ກາມ ເຮົາໄດ້ປະພຶດເພື່ອຂ້າເຈົ້າໄດ້ແລ້ວ
ບັດນີ້ ເຮົາຈຶ່ງບໍ່ເປັນໜີ້ເຈົ້າ
ດຽວນີ້ເຮົາບັນລຸນິບພານທີ່ບຸກຄົນໄປແລ້ວບໍ່ເສົ້າໂສກ

## ໑໐. ວະສະພະເຖຣະຄາຖາ

### ພາສິດຂອງພຣະວະສະພະເຖຣະ

(ພຣະວະສະພະເຖຣະເມື່ອຈະຕິຕຽນຄວາມປາຖະໜາຊົ່ວຊາມ ຈຶ່ງໄດ້ກ່າວ ໔ ຄາຖາໄວ້ດັ່ງນີ້ວ່າ)

[໑໖໙] ບຸກຄົນຜູ້ລວງໂລກຍ່ອມຂ້າຕົນກ່ອນ ພາຍຫຼັງຈຶ່ງຂ້າຜູ້ອື່ນ
ບຸກຄົນຜູ້ລວງໂລກນັ້ນຍ່ອມຂ້າຕົນໄດ້ງ່າຍ
ຄືນາຍພານນົກຫາອຸບາຍຂ້ານົກດ້ວຍນົກຕໍ່

[໑໔໐] ທ່ານສຸຊຳບໍດີ ບຸກຄົນຜູ້ມີວັນນະພາຍນອກ°ບໍ່ຊື່ວ່າເປັນພາມ

ຍ້ອນພານຕ້ອງມີວັນນະພາຍໃນ
ຜູ້ໃດມີກຳຊົ່ວ ຜູ້ນັ້ນແລເປັນຄົນຊັ້ນຕ່ຳ

**ປະຖົມວັກ ຈົບ**

## ລວມເລື້ອງພຣະເຖຣະທີ່ມີໃນວັກນີ້ ຄື

໑. ພຣະອຸດຕະຣະເຖຣະ
໒. ພຣະວັນລິຍະເຖຣະ
໓. ພຣະອະຊິນະເຖຣະ
໗. ພຣະຣາທະເຖຣະ
໙. ພຣະໂຄຕະມະເຖຣະ
໘. ພຣະປິນໂທລະພາຣະທະວາຊະເຖຣະ
໔. ພຣະຄັງຄາຕີຣິຍະເຖຣະ
໖. ພຣະເມລະຊິນະເຖຣະ
໘. ພຣະສຸຣາທະເຖຣະ
໑໐. ພຣະວະສະພະເຖຣະ ລ້ວນມີລິດຫຼາຍ

# ໘. ທຸຕິຍະວັກ

## ໝວດທີ ໘

## ໑. ມະຫາຈຸນທະເຖຣະຄາຖາ

### ພາສິດຂອງພຣະມະຫາຈຸນທະເຖຣະ

(ພຣະມະຫາຈຸນທະເຖຣະເມື່ອຈະສັນເສີນອຸປະນິໄສທີ່ໜັກແໜ້ນແລະການຢູ່ຢ່າງສະຫງັດ ຈຶ່ງໄດ້ກ່າວ ໘ ຄາຖາໄວ້ດັ່ງນີ້ວ່າ)

[໑໘໑] ການຟັງດ້ວຍດີເປັນເຫດໃຫ້ການສຶກສາຈະເລີນ
ການສຶກສາເປັນເຫດໃຫ້ປັນຍາຈະເລີນ
ບຸກຄົນຮູ້ປະໂຫຍດໄດ້ກໍຍ້ອນປັນຍາ
ປະໂຫຍດທີ່ບຸກຄົນຮູ້ແລ້ວນຳຄວາມສຸກມາໃຫ້

[໑໘໘] ພິກຂຸເພິ່ງໃຊ້ເສນາສະນະບ່ອນສະງັດ
ເພິ່ງປະພຶດທຳທີ່ເປັນເຫດໃຫ້ລຸດພົ້ນຈາກສັງໂຍດ
ຖ້າຍັງບໍ່ປະສົບຄວາມຍິນດີໃນເສນາສະນະບ່ອນສະງັດແລະໂມກຂະທຳນັ້ນ
ກໍຄວນເປັນຜູ້ມີສະຕິຮັກສາຕົນຢູ່ໃນໝູ່

# ໔. ໂຊຕິທາສະເຖຣະຄາຖາ

## ພາສິດຂອງພຣະໂຊຕິທາສະເຖຣະ

(ພຣະໂຊຕິທາສະເຖຣະ ເມື່ອຈະສອນພວກຍາດຜູ້ຖືຄວາມບໍລິສຸດພາຍນອກໃນລັດທິຕ່າງ ໆ ຈຶ່ງໄດ້ກ່າວ ໔ ຄາຖາໄວ້ດັ່ງນີ້ ວ່າ)

[໑໔໓] ຊົນເຫຼົ່າໃດເຫຼົ່າໜຶ່ງຜູ້ມີຄວາມພະຍາຍາມດຸຮ້າຍ
ບຽດບຽນມະນຸດທັງຫຼາຍ
ດ້ວຍການກະທຳທີ່ແຝງໄປດ້ວຍຄວາມຜຸນຜັນກໍດີ
ດ້ວຍການເຮັດທີ່ມີຄວາມປະສົງຕ່າງ ໆ ກັນກໍດີ
ແມ່ນຊົນເຫຼົ່ານັ້ນກໍຍ່ອມເຂ່ຍຕົນລົງໃນເຫດນັ້ນຄືກັນ
ຍ້ອນກຳຍ່ອມບໍ່ສູນຫາຍ

[໑໔໔] ຄົນເຮັດກຳໃດໄວ້ ດີຫຼືຊົ່ວກໍຕາມ
ເຂົາຍ່ອມເປັນຜູ້ຮັບຜົນຂອງກຳນັ້ນທີ່ຕົນເຮັດໄວ້ໂດຍແທ້

# ໓. ເຫຣັນຍິການິເຖຣະຄາຖາ

## ພາສິດຂອງພຣະເຫຣັນຍິການິເຖຣະ

(ພຣະເຫຣັນຍິການິເຖຣະເມື່ອຈະຕັກເຕືອນນ້ອງຊາຍ ຈຶ່ງໄດ້ກ່າວ ໔ ຄາຖາໄວ້ດັ່ງນີ້ວ່າ)

[໑໔໕] ມື້ຄືນຜ່ານພົ້ນໄປ ຊີວິດຍ່ອມດັບໄປ
ອາຍຸຂອງສັດທັງຫຼາຍຍ່ອມສິ້ນໄປ
ຄືນ້ຳໃນແມ່ນນ້ຳນ້ອຍສິ້ນໄປ

[໑໔໖] ເມື່ອເປັນແນວນັ້ນ ຄົນພານເຖິງເຮັດບາບກຳຢູ່ກໍບໍ່ຮູ້ສຶກໂຕ
ພາຍຫຼັງ ເຂົາໄດ້ຮັບທຸກແສນສາຫັດ
ຍ້ອນບາບກຳນັ້ນມີຜົນຊົ່ວຊາມ

# ໕. ໂສມະມິດຕະເຖຣະຄາຖາ

## ພາສິດຂອງພຣະໂສມະມິດຕະເຖຣະ

(ພຣະໂສມະມິດຕະເຖຣະເມື່ອຈະຄຸກຄາມພຣະວິມະລະເຖຣະດ້ວຍໂອວາດ ຈຶ່ງໄດ້ກ່າວ ໔ ຄາຖາ ໄວ້ດັ່ງນີ້ວ່າ)

[໑໔໗] ບຸກຄົນເກາະຂອນໄມ້ນ້ອຍ ໆ ຍ່ອມຈົມລົງໃນມະຫາສະມຸດ ສັນໃດ
ບຸກຄົນແມ່ນມີຄວາມເປັນຢູ່ດີ ອາໄສຄົນຂີ້ຄ້ານ
ກໍຈົມລົງໃນສັງສາຣະວັດໄດ້ ສັນນັ້ນ
ຍ້ອນແນວນັ້ນ ບຸກຄົນເພິ່ງເວັ້ນຄົນຂີ້ຄ້ານມີຄວາມພຽນຫຍ່ອນຍານສາ

[໑໔໘] ບຸກຄົນເພິ່ງຢູ່ຮ່ວມກັບເຫຼົ່າບັນດິດຜູ້ສະຫງັດ ເປັນອະຣິຍະ
ຜູ້ມີໃຈເດັດດ່ຽວ ເຂົ້າຊານຢູ່ ຜາຣົບຄວາມພຽນຢູ່ປະຈຳ

## ໕. ສັບພະມິດຕະເຖຣະຄາຖາ

### ພາສິດຂອງພຣະສັບພະມິດຕະເຖຣະ

(ພຣະສັບພະມິດຕະເຖຣະໄດ້ກ່າວ ໔ ຄາຖາໄວ້ດັ່ງນີ້ວ່າ)

[໑໔໙] ຄົນກ່ຽວຂ້ອງກັບຄົນ ຄົນຍິນດີກັບຄົນ
ຄົນຖືກຄົນບຽດບຽນ ແລະຄົນບຽດບຽນຄົນ

[໑໕໐] ຈະຕ້ອງການອັນໃດດ້ວຍຄົນສຳລັບເຂົາ ຫຼືສິ່ງທີ່ຄົນໃຫ້ເກີດ
ຈົ່ງລະຄົນທີ່ບຽດບຽນຄົນຫຼວງຫຼາຍໄປສາ

## ໖. ມະຫາກາລະເຖຣະຄາຖາ

### ພາສິດຂອງພຣະມະຫາການເຖຣະ

(ພຣະມະຫາການເຖຣະເມື່ອຈະກ່າວສອນຕົນ ຈຶ່ງໄດ້ກ່າວ ໔ ຄາຖາໄວ້ດັ່ງນີ້ວ່າ)

[໑໕໑] ນາງກາລີມີຮ່າງກາຍໃຫຍ່ ດຳຄືກາ ຫັກຂາຊ້າຍ ຂາຂວາ
ແຂນຊ້າຍ ແຂນຂວາ ແລະທຸບຫົວຊາກສົບ
ດັ່ງທຸບໝໍ້ນົມສົ້ມ ນັ່ງຈັດໃຫ້ຮຽບຮ້ອຍຢູ່

[໑໕໔] ຜູ້ໃດ ບໍ່ຮູ້ແຈ້ງ ຍ່ອມກໍ່ອຸປະທິກິເລດ
ຜູ້ນັ້ນເປັນຄົນຈ໊າ ຍ່ອມປະສົບທຸກຢູ່ບໍ່ສິ້ນສຸດ
ຍ້ອນແນວນັ້ນ ຜູ້ຮູ້ແຈ້ງ ບໍ່ຄວນກໍ່ອຸປະທິກິເລດ

ເຮົາຢ່າຖືກທຸບທ້ອນອນຢູ່ຢ່າງນີ້ອີກຕໍ່ໄປ

## ໗. ຕິດສະເຖຣະຄາຖາ

### ພາສິດຂອງພຣະຕິດສະເຖຣະ

(ພຣະຕິດສະເຖຣະເມື່ອຈະປະກາດໂທດໃນລາບສັກກາຣະແລະຄວາມທີ່ຕົນບໍ່ຕິດຂ້ອງຢູ່ໃນລາບສັກກາຣະນັ້ນ ຈຶ່ງໄດ້ກ່າວ ໒ ຄາຖາໄວ້ດັ່ງນີ້ວ່າ)

[໑໕໓] ພິກຂຸໂລ້ນຄອງຜ້າສັງຄາຕິ ມັກໄດ້ ເຂົ້າ ນ້ຳ ຜ້າ ແລະບ່ອນນອນ
ຊື່ວ່າໄດ້ຂ້າເສິກໄວ້ຫຼາຍ

[໑໕໒] ພິກຂຸຮູ້ໂທດໃນລາບສັກກາຣະວ່າ ເປັນໄພໃຫຍ່ແນວນີ້ແລ້ວ
ຄວນເປັນຜູ້ມີລາບໜ້ອຍ ມີຈິດບໍ່ຊຸ່ມດ້ວຍຕັນຫາ ມີສະຕິ ເວັ້ນຂາດ

## ໘. ກິມພິລະເຖຣະຄາຖາ

### ພາສິດຂອງພຣະກິມພິລະເຖຣະ

(ທ່ານພຣະກິມພິລະເຖຣະເມື່ອຈະສະແດງຄວາມຢູ່ຮ່ວມກັນດ້ວຍຄວາມສາມັກຄີ ຈຶ່ງໄດ້ກ່າວ ໒ ຄາຖາໄວ້ດັ່ງນີ້ວ່າ)

[໑໕໕] ພຣະສາກະຍະບຸດທັງຫຼາຍເຊິ່ງເປັນສະຫາຍກັນໃນປາຈີນະວັງສະທາຍະວັນ
ພາກັນລະຖິ້ມໂພຄະບໍ່ໜ້ອຍ ມາຍິນດີໃນການທ່ຽວສະແຫວງຫາບິນທະບາດ

[໑໕໖] ຜາຣົບຄວາມພຽນ ມີໃຈເດັດດ່ຽວ
ບາກບັ່ນມຸ້ງໝັ້ນຢູ່ປະຈຳ
ລະຄວາມຍິນດີທີ່ເປັນໂລກິຍະ
ມາຍິນດີຢູ່ດ້ວຍຄວາມຍິນດີໃນທຳ

## ໙. ນັນທະເຖຣະຄາຖາ

### ພາສິດຂອງພຣະນັນທະເຖຣະ

(ພຣະນັນທະເຖຣະເກີດຄວາມໂສມະນັດ ຈຶ່ງໄດ້ກ່າວ ໒ ຄາຖາໄວ້ດັ່ງນີ້ວ່າ)

[໑໕໗] ເຮົາມົວປະກອບການປະດັບຕົກແຕ່ງ
ມີຈິດຟຸ້ງຊ່ານແລະກວັດແກວ່ງ
ຖືກການຣາຄະລົບກວນ ຍ້ອນບໍ່ໄດ້ເຮັດໂຍນິໂສມະນະສິການ[១]

[໑໕໘] ເຮົາປະຕິບັດໂດຍອຸບາຍທີ່ຖືກ
ອັນພຣະພຸດທະເຈົ້າຜູ້ເປັນເຜົ່າພັນພຣະອາທິດຜູ້ສະຫຼາດໃນອຸບາຍ
ໄດ້ຊົງສັ່ງສອນແນະນຳແລ້ວ
ຈຶ່ງຖອນຈິດໃນພົບໄດ້ແລ້ວ

# ໑໐. ສິຣິມະເຖຣະຄາຖາ

## ພາສິດຂອງພຣະສິຣິມະເຖຣະ

(ພຣະສິຣິມະເຖຣະເມື່ອຈະຕິຕຽນຄວາມເປັນປຸຖຸຊົນ ຈຶ່ງໄດ້ກ່າວ ໒ ຄາຖາໄວ້ດັ່ງນີ້ວ່າ)

[໑໕໙] ຖ້າຕົນມີຈິດບໍ່ຕັ້ງໝັ້ນ
ແມ່ນຊົນເຫຼົ່າອື່ນຈະສັນເສີນ
ຊົນເຫຼົ່າອື່ນກໍສັນເສີນເປົ່າ
ຍ້ອນຕົນມີຈິດບໍ່ຕັ້ງໝັ້ນ

[໑໖໐] ຖ້າຕົນມີຈິດຕັ້ງໝັ້ນດີແລ້ວ
ແມ່ນຊົນເຫຼົ່າອື່ນຈະຕິຕຽນ
ຊົນເຫຼົ່າອື່ນກໍຕິຕຽນເປົ່າ
ຍ້ອນຕົນມີຈິດຕັ້ງໝັ້ນດີແລ້ວ

**ທຸຕິຍະວັກ ຈົບ**

## ລວມເລື້ອງພຣະເຖຣະທີ່ມີໃນວັກນີ້ ຄື

໑. ພຣະມະຫາຈຸນທະເຖຣະ
໒. ພຣະໂຊຕິທາສະເຖຣະ
໓. ພຣະເຫຣັນຍິການິເຖຣະ
໔. ພຣະໂສມະມິດຕະເຖຣະ
໕. ພຣະສັບພະມິດຕະເຖຣະ
໖. ພຣະມະຫາກາລະເຖຣະ
໗. ພຣະຕິດສະເຖຣະ
໘. ພຣະກິມພິລະເຖຣະ
໙. ພຣະນັນທະເຖຣະ
໑໐. ພຣະສິຣິມະເຖຣະ

# ៣. ຕະຕິຍະວັກ

## ໝວດທີ ៣

## ១. ອຸດຕະຣະເຖຣະຄາຖາ
### ພາສິດຂອງພຣະອຸດຕະຣະເຖຣະ

(ພຣະອຸດຕະຣະເຖຣະເມື່ອພະຍາກອນພຣະອະຣະຫັດ ຈຶ່ງໄດ້ກ່າວ ๔ ຄາຖາໄວ້ດັ່ງນີ້ວ່າ)

[១໗១] ເຮົາກຳນົດຮູ້ຂັນທັງຫຼາຍແລ້ວ ຖອນຕັນຫາຂຶ້ນໄດ້ດ້ວຍດີ
ເຖິງໂພດຊົງເຮົາຈະເລີນແລ້ວ ເຮົາໄດ້ເຖິງຄວາມສິ້ນອາສະວະແລ້ວ

[១໗๔] ເມື່ອກຳນົດຮູ້ຂັນທັງຫຼາຍແລ້ວ ຖອນຕັນຫາຄືຕາໜ່າງໄດ້
ຈະເລີນໂພດຊົງແລ້ວ ຈັກເປັນຜູ້ບໍ່ມີອາສະວະນິບພານ

## ๔. ພັດທະຊິເຖຣະຄາຖາ

### ພາສິດຂອງພຣະພັດທະຊິເຖຣະ

(ພຣະພັດທະຊິເຖຣະສັນເສີນຜາສາດຄຳທີ່ຕົນເຄີຍຄອບຄອງ ຈຶ່ງໄດ້ກ່າວ ๔ ຄາຖາໄວ້ດັ່ງນີ້ວ່າ)

[១໗៣] ພຣະຣາຊາຊົງພຣະນາມວ່າປະນາທະ
ມີຜາສາດຄຳກວ້າງແລະສູງປະມານ ១໖ ໂຍດ
ຊົນທັງຫຼາຍກ່າວກັນວ່າສູງປະມານ ១,០០០ ໂຍດ

[១໗๔] ມີຊັ້ນພັນຊັ້ນ ຮ້ອຍຍອດ ສະພັ່ງໄປດ້ວຍທຸງ
ພາວໄປດ້ວຍແກ້ວສີຂຽວ
ໃນຜາສາດນັ້ນ ມີນັກຟ້ອນທິກາພັນຄົນ ແບ່ງເປັນ ៧ ກຸ່ມ
ພາກັນຟ້ອນລຳຢູ່

## ៣. ໂສພິຕະເຖຣະຄາຖາ

### ພາສິດຂອງພຣະໂສພິຕະເຖຣະ

ຮູ້ວ່າ ທ່ານພຣະໂສພິຕະເຖຣະ ເມື່ອເປ່ງອຸທານ ຈຶ່ງໄດ້ກ່າວ ๔ ຄາຖາໄວ້ດັ່ງນີ້ວ່າ

[໑໓໕]  ເຮົາເປັນພິກຂຸ ມີສະຕິ ມີປັນຍາ ພໍ່າເພັງພຽນຢ່າງແຮງກ້າ
ຣະນຶກຊາດກ່ອນໄດ້ ໕໐໐ ກັບພຽງຄືນດຽວ

[໑໓໖]  ເຮົາຈະເລີນສະຕິປັດຖານ ໔ ໂພດຊົງ ໗ ມັກ ໘
ຣະນຶກຊາດກ່ອນໄດ້ ໕໐໐ ກັບ ພຽງຄືນດຽວ

# ໔. ວັນລິຍະເຖຣະຄາຖາ

## ພາສິດຂອງພຣະວັນລິຍະເຖຣະ

(ພຣະວັນລິຍະເຖຣະເມື່ອຈະຖາມພຣະເວນຸທັດຕະເຖຣະ ຈຶ່ງໄດ້ກ່າວ ໔ ຄາຖາໄວ້ດັ່ງນີ້ວ່າ)

[໑໓໗]  ກິດໃດອັນບຸກຄົນຜູ້ມີຄວາມພຽນໝັ້ນ
ມຸ້ງທີ່ຈະຕັດສະຣູ້ ເພິ່ງເຮັດກິດນັ້ນ
ເຮົາຈັກເຮັດບໍ່ໃຫ້ພາດ
ເຊີນທ່ານເບິ່ງຄວາມພຽນ ຄວາມບາກບັ່ນຂອງເຮົາເທີ້ນ

[໑໓໘]  ອັນໜຶ່ງ ຂໍທ່ານຈົ່ງບອກຫົນທາງອັນຢັ່ງລົງສູ່ອະມະຕະມະຫານິບພານ
ເຊິ່ງເປັນທາງຊື່ໃຫ້ເຮົາ ເຮົາຈະຮູ້ດ້ວຍຍານ
ຄືກະແສແມ່ນ້ຳຄົງຄາໄຫຼໄປສູ່ສາຄອນ

# ໕. ວິຕະໂສກະເຖຣະຄາຖາ

## ພາສິດຂອງພຣະວິຕະໂສກະເຖຣະ

(ພຣະວິຕະໂສກະເຖຣະເມື່ອຈະພະຍາກອນພຣະອະຣະຫັດ ຈຶ່ງໄດ້ກ່າວ ໔ ຄາຖາໄວ້ດັ່ງນີ້ວ່າ)

[໑໓໙]  ຊ່າງຕັດຜົມເຂົ້າມາຫາເຮົາ ດ້ວຍຄິດວ່າ ຈັກຕັດຜົມຂອງເຮົາ
ເຮົາຈຶ່ງຮັບເອົາແວ່ນຈາກຊ່າງຕັດຜົມນັ້ນມາແຍງເບິ່ງຮ່າງກາຍ

[໑໗໐]  ຮ່າງກາຍໄດ້ຜາກົດເປັນສະພາບວ່າງເປົ່າ
ຄວາມບອດ ຄວາມມືດໄດ້ສິ້ນໄປ
ກິເລດຄືຜ້າເປື້ອນທັງປວງ ເຮົາຕັດຂາດດ້ວຍດີແລ້ວ
ບັດນີ້ ບໍ່ມີການເກີດອີກ

# ໖. ປຸນນະມາສະເຖຣະຄາຖາ

## ພາສິດຂອງພຣະປຸນນະມາດເຖຣະ

(ພຣະປຸນນະເຖຣະເມື່ອຈະສະແດງທຳແກ່ພັນລະຍາເກົ່າ ຈຶ່ງໄດ້ກ່າວ ໔ ຄາຖາໄວ້ດັ່ງນີ້ວ່າ)

[໑໗໑] ເຮົາລະນິວອນ[໑] ໕ ເພື່ອບັນລຸນິບພານ
ເຊິ່ງເປັນແດນກະເສມຈາກໂຍຄະແລ້ວ
ຖືເອົາແວ່ນສ່ອງທຳ ຄືຍານທັດສະນະສຳລັບຕົນ

[໑໗໔] ພິຈາລະນາເບິ່ງຮ່າງກາຍນີ້ທົ່ວທັງພາຍໃນພາຍນອກ
ຮ່າງກາຍຂອງເຮົາໄດ້ຜາກົດເປັນສະພາບວ່າງເປົ່າ
ທັງພາຍໃນແລະພາຍນອກ

# ໗. ນັນທະກະເຖຣະຄາຖາ

## ພາສິດຂອງພຣະນັນທະກະເຖຣະ

(ພຣະນັນທະກະເຖຣະເມື່ອຈະພະຍາກອນພຣະອະຣະຫັດ ຈຶ່ງໄດ້ກ່າວ ໔ ຄາຖາໄວ້ດັ່ງນີ້ວ່າ)

[໑໗໓] ງົວອາຊາໄນທີ່ດີ ພະລາດລົ້ມແລ້ວລຸກຂຶ້ນຢືນໃໝ່ໄດ້
ໄດ້ຄວາມສັງເວດຢ່າງຍິ່ງແລ້ວ ບໍ່ທໍ້ທໍ້ ນຳພາຣະຕໍ່ໄປໄດ້ ສັນໃດ

[໑໗໔] ທ່ານທັງຫຼາຍຈົ່ງຊົງຈຳຂ້ານ້ອຍໄວ້ວ່າ
ເປັນອາຊາໄນສົມບູນດ້ວຍທັດສະນະ
ເປັນສາວົກຂອງພຣະສຳມາສຳພຸດທະເຈົ້າ
ເປັນບຸດເຊິ່ງເກີດແຕ່ພຣະອຸຣະຂອງພຣະພຸດທະເຈົ້າ ສັນນັ້ນ

# ໘. ພາຣະຕະເຖຣະຄາຖາ

## ພາສິດຂອງພຣະພາຣະຕະເຖຣະ

(ພຣະພາຣະຕະເຖຣະເມື່ອຈະບອກມິດສາວິຕົກທີ່ເກີດແກ່ພຣະນັນທະກະເຖຣະ ຈຶ່ງໄດ້ກ່າວ ໔ ຄາຖາໄວ້ດັ່ງນີ້ວ່າ)

[໑໗໕] ເຊີນມາເທີ້ນບັນທະກະ ເຮົາໄປສູ່ສຳນັກພຣະອຸປັດຊາ
ຈັກບັນລືສີຫະນາດສະເພາະພຣະພັກພຣະພຸດທະເຈົ້າຜູ້ປະເສີດ

[໑໗໖] ພຣະຜູ້ມີພຣະພາກເຈົ້າຜູ້ເປັນມຸນີຊົງອີດູໃຫ້ພວກເຮົາບວດ
ເພື່ອປະໂຫຍດໃດ ປະໂຫຍດນັ້ນຄືຄວາມສິ້ນສັງໂຍດທັງປວງ
ພວກເຮົາກໍໄດ້ບັນລຸແລ້ວ

## ໙. ພາຣະທະວາຊະເຖຣະຄາຖາ

### ພາສິດຂອງພຣະພາຣະທະວາຊະເຖຣະ

(ພຣະພາຣະທະວາຊະເຖຣະເມື່ອຈະບອກປະຣິຍັດຕິທຳແລະປະຕິບັດທຳແກ່ບຸດ ຈຶ່ງໄດ້ກ່າວ ໔ ຄາຖາໄວ້ດັ່ງນີ້ວ່າ)

[໑໗໗] ທີຣະຊົນຜູ້ມີປັນຍາ ຊະນະມານພ້ອມທັງເສນາມານ
ຊື່ວ່າ ຊະນະສົງຄາມ
ຍ່ອມບັນລືຄືຣາດຊະສີບັນລືທີ່ຊ່ອມພູ

[໑໗໘] ພຣະສາດສະດາເຮົາເຂົ້າເຖິງແລ້ວ
ພຣະທຳເຮົາກໍບູຊາ
ແລະພຣະສົງເຮົາກໍນັບຖືແລ້ວ
ແລະຍ້ອນໄດ້ເຫັນລູກຜູ້ບໍ່ມີອາສະວະກິເລດ
ພໍ່ກໍຍິນດີ ດີໃຈ

## ໑໐. ກັນທະທິນນະເຖຣະຄາຖາ

### ພາສິດຂອງພຣະກັນທະທິນນະເຖຣະ

(ພຣະກັນທະທິນນະເຖຣະເມື່ອຈະພະຍາກອນພຣະອະຣະຫັດ ຈຶ່ງໄດ້ກ່າວ ໔ ຄາຖາໄວ້ດັ່ງນີ້ວ່າ)

[໑໗໙] ສັດຕະບຸຣຸດທັງຫຼາຍ ເຮົາເຂົ້າໄປຫາແລ້ວ
ທຳທັງຫຼາຍເຮົາຟັງແລ້ວ ເນືອງນິດ
ເມື່ອຟັງທຳແລ້ວ ຈະດຳເນີນໄປສູ່ທາງອັນຢັ່ງລົງສູ່ອະມະຕະທຳ

[໑໘໐] ເມື່ອເຮົາ ເປັນຜູ້ກຳຈັດຄວາມກຳໜັດຍິນດີໃນພົບໄດ້ແລ້ວ

ຄວາມກຳໜັດຍິນດີໃນພົບຍ່ອມບໍ່ມີແກ່ເຮົາອີກ
ບໍ່ໄດ້ມີແລ້ວ ຈັກບໍ່ມີ ແລະໃນບັດນີ້ກໍບໍ່ມີແກ່ເຮົາ

**ຕະຕິຍະວັກ ຈົບ**

## ລວມເລື້ອງພຣະເຖຣະທີ່ມີໃນວັກນີ້ ຄື

໑. ພຣະອຸດຕະຣະເຖຣະ
໒. ພຣະໂສພິຕະເຖຣະ
໓. ພຣະວີຕະໂສກະເຖຣະ
໔. ພຣະນັນທະກະເຖຣະ
໕. ພຣະພາຣະທະວາຊະເຖຣະ
໖. ພຣະພັດທະຊິເຖຣະ
໗. ພຣະວັນລິຍະເຖຣະ
໘. ພຣະປຸນນະມາດເຖຣະ
໙. ພຣະພາຣະຕິເຖຣະ
໑໐. ພຣະກັນທະທິນນະເຖຣະ

# ໔. ຈະຕຸດຖະວັກ

## ໝວດທີ ໔

## ໑. ມິຄະສີຣະເຖຣະຄາຖາ

### ພາສິດຂອງພຣະມິຄະສີຣະເຖຣະ

(ພຣະມິຄະສີຣະເຖຣະເມື່ອຈະພະຍາກອນພຣະອະຣະຫັດ ຈຶ່ງໄດ້ກ່າວ ໒ ຄາຖາໄວ້ດັ່ງນີ້ວ່າ)

[໑໙໑] ຈຳເດີມແຕ່ການທີ່ເຮົາໄດ້ບວດໃນພຣະສາດສະໜາ
ຂອງພຣະສຳມາສຳພຸດທະເຈົ້າ
ເມື່ອຈະລຸດພົ້ນ ໄດ້ບັນລຸ ລ່ວງເສຍເຊິ່ງການທາດ[១]

[໑໙໒] ຕໍ່ແຕ່ນັ້ນ ເມື່ອເຮົາເພ່ງທຳຂອງພຣະພຸດທະເຈົ້າຜູ້ເປັນດັ່ງພົມ
ຈິດຈຶ່ງລຸດພົ້ນແລະມາຮູ້ແຈ້ງວ່າ ຄວາມລຸດພົ້ນຂອງເຮົາບໍ່ກຳເຮີບ
ຍ້ອນຄວາມສິ້ນໄປແຫ່ງສັງໂຍດທັງປວງ

## ໒. ສີວະກະເຖຣະຄາຖາ

### ພາສິດຂອງພຣະສີວະກະເຖຣະ

(ພຣະສີວະກະເຖຣະເມື່ອຈະພະຍາກອນພຣະອະຣະຫັດ ຈຶ່ງໄດ້ກ່າວ ໒ ຄາຖາໄວ້ດັ່ງນີ້ວ່າ)

[໑໗໓] ເຮືອນຄືອັດຕະພາບທີ່ເກີດໃນພົບນັ້ນ ໆ ຢູ່ເລື້ອຍ ໆ
ເປັນຂອງບໍ່ທ່ຽງ
ເຮົາມົວສະແຫວງຫານາຍຊ່າງຄືຕັນຫາຜູ້ສ້າງເຮືອນ
ຈຶ່ງໄດ້ທ່ອງທ່ຽວໄປສິ້ນການນິປະມານທີ່ນີ້
ການເກີດຢູ່ເລື້ອຍ ໆ ເປັນທຸກ

[໑໗໔] ແນ່ະນາຍຊ່າງຜູ້ສ້າງເຮືອນ
ບັດນີ້ ເຮົາພົບທ່ານແລ້ວ
ທ່ານຈະສ້າງເຮືອນອີກບໍ່ໄດ້
ກອນເຮືອນຄືກິເລດຂອງທ່ານ ເຮົາຫັກໝົດແລ້ວ
ແລະຊໍ່ຟ້າຄືອະວິດຊາແຫ່ງເຮືອນທີ່ທ່ານສ້າງ ເຮົາກໍທໍາລາຍແລ້ວ
ຈິດຂອງເຮົາ ເຮົາເຮັດໃຫ້ສິ້ນສຸດ ຈະດັບໃນພົບນີ້ເອງ

## ໓. ອຸປະວານະເຖຣະຄາຖາ

### ພາສິດຂອງພຣະອຸປະວານະເຖຣະ

(ພຣະອຸປະວານະເຖຣະເມື່ອຈະບອກປະໂຫຍດແກ່ພາມ ຈຶ່ງໄດ້ກ່າວ ໔ ຄາຖາໄວ້ດັ່ງນີ້ວ່າ)

[໑໗໕] ທ່ານພາມ ພຣະສຸຄົດເຈົ້າເປັນພຣະອະຣະຫັນ ໃນໂລກ
ເປັນມຸນີ ຖືກລົມບຽດບຽນແລ້ວ
ຖ້າມີນໍ້າຮ້ອນ ຂໍທ່ານຈົ່ງຖວາຍພຣະມຸນີເທີ້ນ

[໑໗໖] ພຣະມຸນີພຣະອົງນັ້ນເປັນຜູ້ອັນບຸກຄົນຜູ້ຄວນບູຊາ ບູຊາແລ້ວ
ຜູ້ຄວນສັກກາຣະ ສັກກາຣະແລ້ວ ແລະຜູ້ຄວນນອບນ້ອມ ນອບນ້ອມແລ້ວ
ເຮົາປາຖະໜາຈະນໍານໍ້າຮ້ອນໄປຖວາຍພຣະອົງ

## ໔. ອິສິທິນນະເຖຣະຄາຖາ

### ພາສິດຂອງເທວະດາເຕືອນພຣະອິສິທິນນະເຖຣະ

(ເທວະດາຜູ້ຫວັງປະໂຫຍດເກື້ອກູນ ເມື່ອຈະເຕືອນພຣະອິສິທິນນະເຖຣະ ຈຶ່ງໄດ້ກ່າວ ໔ ຄາຖາໄວ້ດັ່ງນີ້ວ່າ)

[໑໗໗] ເຮົາ (ເທວະດາ) ເຫັນອຸປາສົກທັງຫຼາຍຜູ້ຊົງທໍາ

ກ່າວຢູ່ວ່າ ການທັງຫຼາຍບໍ່ທ່ຽງ
ແຕ່ອຸປາສິກາເຫຼົ່ານັ້ນ ເປັນຜູ້ກຳໜັດຢ່າງແຮງກ້າ
ຫ່ວງໃຍໃນແກ້ວມະນີ ຕຸ້ມຫູ ບຸດທິດາແລະພັນລະຍາ

[໑໗໗] ຍ້ອນເຫດທີ່ອຸປາສິກາເຫຼົ່ານັ້ນ
ບໍ່ຮູ້ທຳໃນພຣະສາດສະໜານີ້ເປັນແນ່
ເຖິງແນວນັ້ນ ກໍຍັງກ່າວວ່າ ການທັງຫຼາຍບໍ່ທ່ຽງ
ແຕ່ພວກເຂົາບໍ່ມີກຳລັງປັນຍາທີ່ຈະຕັດຣາຄະໄດ້
ດັ່ງນັ້ນ ພວກເຂົາຈຶ່ງຕິດບຸດທິດາ ພັນລະຍາແລະຊັບ
ພຣະອິສິທິນນະເຖຣະ (ຟັງຄຳນັ້ນແລ້ວກໍເກີດຄວາມສັງເວດ
ບໍ່ດົນປານໃດກໍໄດ້ບັນລຸພຣະອະຣະຫັດ)

## ໕. ສຳພຸລະກັດຈານະເຖຣະຄາຖາ

### ພາສິດຂອງພຣະສຳພຸລະກັດຈານະເຖຣະ

(ພຣະສຳພຸລະກັດຈານະເຖຣະເມື່ອຈະພະຍາກອນພຣະອະຣະຫັດ ຈຶ່ງໄດ້ກ່າວ ໒ ຄາຖາ ໄວ້ດັ່ງນີ້ວ່າ)

[໑໗໘] ຝົນຕົກໄປເທີ້ນ ຟ້າຮ້ອງຮື່ມ ໆ ໄປເທີ້ນ
ແລະເຮົາຄົນດຽວຢູ່ໃນຖ້ຳທີ່ເປັນຕາຢ້ານ
ເຖິງເຮົາຄົນດຽວຈະຢູ່ໃນຖ້ຳທີ່ເປັນຕາຢ້ານ
ກໍບໍ່ມີຄວາມຢ້ານ ຄວາມສະດຸ້ງຫວາດສຽວ ຫຼືຂົນລຸກຂົນພອງ

[໑໘໐] ການທີ່ເຮົາຄົນດຽວຢູ່ໃນຖ້ຳທີ່ເປັນຕາຢ້ານ
ກໍບໍ່ມີຄວາມຢ້ານ ຄວາມສະດຸ້ງຫວາດສຽວ
ຫຼືຂົນລຸກຂົນພອງ ນີ້ເປັນທຳມະດາ

## ໖. ຂິຕະກະເຖຣະຄາຖາ

### ພາສິດຂອງພຣະຂິຕະກະເຖຣະ

(ພຣະຂິຕະກະເຖຣະເມື່ອຈະຂົ່ມພວກພິກຂຸຜູ້ຢູ່ປ່າ ຈຶ່ງໄດ້ກ່າວ ໒ ຄາຖາໄວ້ດັ່ງນີ້ວ່າ)

[໑໘໑] ຈິດຂອງໃຜຕັ້ງໝັ້ນ ບໍ່ຫວັ່ນໄຫວດັ່ງພູ

ບໍ່ກຳໜັດໃນອາລົມອັນຊວນໃຫ້ກຳໜັດ
ບໍ່ຂັດເຄືອງໃນອາລົມອັນຊວນໃຫ້ຂັດເຄືອງ
ຜູ້ໃດອົບຮົມຈິດໄດ້ຢ່າງນີ້
ທຸກຈະມາເຖິງຜູ້ນັ້ນແຕ່ບ່ອນໃດ

[໑໙໘] ຈິດຂອງເຮົາຕັ້ງໝັ້ນ ບໍ່ຫວັ່ນໄຫວດັ່ງພູ
ບໍ່ກຳໜັດໃນອາລົມອັນຊວນໃຫ້ກຳໜັດ
ບໍ່ຂັດເຄືອງໃນອາລົມອັນຊວນໃຫ້ຂັດເຄືອງ
ເຮົາອົບຮົມຈິດໄດ້ແລ້ວແນວນີ້
ທຸກຈະມາເຖິງເຮົາແຕ່ບ່ອນໃດ

## ໗. ໂສນະໂປຕິຣິຍະປຸດຕະເຖຣະຄາຖາ
## ພາສິດຂອງພຣະໂສນະໂປຕິຣິຍະປຸດຕະເຖຣະ

(ພຣະຜູ້ມີພຣະພາກເຈົ້າ ເມື່ອຈະຕັດສອນພຣະໂສນະໂປຕິຣິຍະບຸດເຖຣະ ຈຶ່ງໄດ້ຕັດພຣະ ຄາຖາວ່າ)

[໑໙໓] ຣາຕີທີ່ປະກອບດ້ວຍເລີກມາລີນີ໌
ບໍ່ແມ່ນເປັນຣາຕີທີ່ຈະຫຼັບກ່ອນ
ຣາຕີແນວນີ້ເປັນຣາຕີທີ່ຜູ້ຮູ້ແຈ້ງປາຖະໜາແລ້ວ
ເພື່ອປະກອບຄວາມພຽນໂດຍແທ້

(ພຣະໂສນະໂປຕິຣິຍະເຖຣະໄດ້ຟັງພຣະດຳຣັດນັ້ນກໍສະຫຼົດໃຈ ກັບໄດ້ທີຣິໂອດຕັບປະ ອະທິຖານອັບໂພກາຊິກັງຄະທຸດົງ໌ ກະທຳການຈະເລີນວິປັດສະນາ ໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ)

[໑໙໔] ຖ້າຊ້າງເພິ່ງຢຽບເຮົາຜູ້ຕົກຈາກຄໍຊ້າງ
ເຮົາຕາຍສາໃນສົງຄາມປະເສີດກວ່າ
ປຣາໄຊແລ້ວເປັນຢູ່ຈະປະເສີດອັນໃດ

## ໘. ນິສະພະເຖຣະຄາຖາ

## ພາສິດຂອງພຣະນິສະພະເຖຣະ

(ພຣະນິສະພະເຖຣະ ເມື່ອຈະກ່າວສອນພິກຂຸສະຫາຍທັງຫຼາຍ ຈຶ່ງໄດ້ກ່າວ ໔ ຄາຖາໄວ້ດັ່ງນີ້ວ່າ)

[๑๗๕] ວິນຍູຊົນລະປັນຈະການະຄຸນ ເຊິ່ງໜ້າຮັກໜ້າອອນຊອນໃຈ
ອອກບວດດ້ວຍສັດທາ ເພິ່ງເຮັດບ່ອນສຸດທຸກໄດ້

[๑๗๖] ເຮົາບໍ່ຍາກຕາຍ ບໍ່ຍາກເປັນຢູ່
ແຕ່ເຮົາມີສະຕິສໍາປະຊັນຍະຢູ່ສະເພາະໜ້າ ຖ້າເວລາອັນຄວນ

## ๙. ອຸສະພະເຖຣະຄາຖາ

### ພາສິດຂອງພຣະອຸສະພະເຖຣະ

(ພຣະອຸສະພະເຖຣະເມື່ອຈະພະຍາກອນພຣະອະຣະຫັດ ຈຶ່ງໄດ້ກ່າວ ๔ ຄາຖາໄວ້ດັ່ງນີ້ວ່າ)

[๑๗๗] ເຮົາຝັນວ່າໄດ້ຫົ່ມຈີວອນສີໃບໝາກມ່ວງອ່ອນບົ່ງງບ່າ
ນັ່ງເທິງຄໍຊ້າງ ເຂົ້າໄປບິນທະບາດຍັງໝູ່ບ້ານ

[๑๗๘] ລົງຈາກຄໍຊ້າງແລ້ວ ໄດ້ຄວາມສະຫຼົດໃຈ
ຄັ້ງນັ້ນ ເຮົານັ້ນມີຄວາມສະຫວ່າງ
ໄດ້ຄວາມສະຫຼົດໃຈ ເຖິງຄວາມສິ້ນອາສະວະແລ້ວ

## ๑๐. ກັບປະຕະກຸຣະເຖຣະຄາຖາ

### ພາສິດຂອງພຣະກັບປະຕະກຸຣະເຖຣະ

(ພຣະຜູ້ມີພຣະພາກເຈົ້າ ເມື່ອຈະຕັດສອນພຣະກັບປະຕະກຸຣະເຖຣະ ຈຶ່ງໄດ້ຕັດ ๔ ຄາຖາໄວ້ດັ່ງນີ້ວ່າ)

[๑๗๙] ກັບປະຕະກຸຣະພິກຂຸເກີດຄວາມວິຕົກຜິດວ່າ ຜ້າເປື້ອນຜືນນີ້ເປັນຂອງເຮົາ
ເມື່ອນ້ຳໃສ (ຄືອະມະຕະທຳ) ມີຢູ່ເຕັມປ່ຽມໃນໝໍ້ອະມະຕະທຳ
ກັບມີໃຈປາສະຈາກອະມະຕະທຳຄຳສອນຂອງເຮົານີ້
ເປັນທາງທີ່ເຮົາສອນໄວ້ແລ້ວເພື່ອສັ່ງສົມຊານທັງຫຼາຍ

[๔๐๐] ກັບປະຕະ ທ່ານຢ່ານານັ່ງໂງກງ່ວງຢູ່ເລີຍ
ຢ່າໃຫ້ເຮົາຕ້ອງສອນທ່ານສຽງດັງ ໃນບ່ອນໃກ້ຫູເລີຍ
ກັບປະຕະ ທ່ານນັ່ງໂງກງ່ວງຢູ່ໃນທ່າມກາງສົງຊ່າງບໍ່ຮູ້ຈັກປະມານເລີຍ

**ຈະຕຸດຖະວັກ ຈົບ**

## ລວມເລື້ອງພຣະເຖຣະທີ່ມີໃນວັກນີ້ ຄື

໑. ພຣະມິຄະສິຣະເຖຣະ
໒. ພຣະອຸປະວານະເຖຣະ
໓. ພຣະສຳພຸລະກັດຈານະເຖຣະ
໔. ພຣະໂສນະໂປຕິຣິຍະບຸດເຖຣະ
໕. ພຣະອຸສະພະເຖຣະ
໖. ພຣະສິວະກະເຖຣະ
໗. ພຣະອິສິທິນນະເຖຣະ
໘. ພຣະຂິຕະກະເຖຣະ
໙. ພຣະນິສະພະເຖຣະ
໑໐. ພຣະກັບປະຕະກຸຣະເຖຣະ

# ໓. ປັນຈະມະວັກ

## ໝວດທີ ໓

## ໑. ກຸມາຣະກັດສະປະເຖຣະຄາຖາ

### ພາສິດຂອງພຣະກຸມານກັດສະປະເຖຣະ

(ພຣະກຸມານກັດສະປະເຖຣະ ເມື່ອຈະພະຍາກອນພຣະອະຣະຫັດ ຈຶ່ງໄດ້ກ່າວ ໒ ຄາຖາໄວ້ດັ່ງນີ້ວ່າ)

[໒໐໑] ໜ້າອັດສະຈັນນໍ ພຣະພຸດທະເຈົ້າ ພຣະທຳ
ແລະສຳປະທາຂອງພຣະສາດສະດາຂອງເຮົາທັງຫຼາຍ
ອັນເປັນທີ່ຈະເຮັດພຣະສາວົກໃຫ້ຮູ້ແຈ້ງທຳເຊັ່ນນັ້ນໄດ້

[໒໐໒] ບັນດາພຣະສາວົກທີ່ຢັ່ງຮູ້ເຖິງກາຍຂອງຕົນ[๑]
ໄດ້ໃນອະສົງໄຂກັບ[๒] ນັ້ນ
ພຣະກຸມານກັດສະປະນີ້ເປັນອົງສຸດທ້າຍ
ຮ່າງກາຍນີ້ເປັນຮ່າງກາຍສຸດທ້າຍ
ການວຽນວ່າຍຕາຍເກີດເປັນວາຣະສຸດທ້າຍ
ບັດນີ້ ບໍ່ມີການເກີດອີກ

## ໒. ທຳມະປາລະເຖຣະຄາຖາ

### ພາສິດຂອງພຣະທຳມະປາລະເຖຣະ

(ພຣະທຳປາລະເຖຣະເມື່ອຈະສະແດງທຳໂຜດພວກສາມະເນນ ຈຶ່ງໄດ້ກ່າວ ໒ ຄາຖາໄວ້ດັ່ງນີ້ວ່າ)

[໔໐໓] ພິກຂຸໃດແລຍັງໜຸ່ມແໜ້ນ
ປະກອບຄວາມຂົນຂວາຍໃນພຣະພຸດທະສາດສະໜາ
ຜູ້ຕື່ນຢູ່ ໃນເມື່ອຄົນເຫຼົ່າອື່ນຫຼັບແລ້ວ
ຊື່ວ່າບໍ່ຂາດຜົນ

[໔໐໔] ຍ້ອນແນວນັ້ນ ພິກຂຸຜູ້ມີປັນຍາ
ຣະນຶກເຖິງຄຳສອນຂອງພຣະພຸດທະເຈົ້າທັງຫຼາຍ
ຈຶ່ງຄວນປະກອບສັດທາ ສິນ ຄວາມເຫຼື້ອມໃສ
ແລະການເຫັນທຳເນືອງ ໆ

## ໓. ພິມມາລິເຖຣະຄາຖາ

## ພາສິດຂອງພຣະພິມມາລິເຖຣະ

(ພຣະພິມມາລິເຖຣະເມື່ອຈະຍ້ອງຍໍການປະກອບຄວາມພຽນເນືອງ ໆ ຈຶ່ງໄດ້ກ່າວ ໔ ຄາຖາໄວ້ດັ່ງນີ້ວ່າ)

[໔໐໕] ອິນຊີຂອງໃຜເຖິງຄວາມສະງົບ
ຄືມ້າທີ່ນາຍສາຣະຖີເຝິກດີແລ້ວ
ແມ່ນເທວະດາທັງຫຼາຍ ກໍຍິນດີ(ຊົມຊື່ນ)ຕໍ່ຜູ້ນັ້ນ
ເຊິ່ງລະມານະໄດ້ແລ້ວ ບໍ່ມີອາສະວະ ເປັນຜູ້ໝັ້ນຄົງ

[໔໐໖] ອິນຊີຂອງເຮົາເຖິງຄວາມສະງົບ
ຄືມ້າໂຕທີ່ນາຍສາຣະຖີເຝິກດີແລ້ວ
ແມ່ນເທວະດາທັງຫຼາຍ ກໍຍິນດີຕໍ່ເຮົາ
ເຊິ່ງລະມານະໄດ້ແລ້ວ ບໍ່ມີອາສະວະ ເປັນຜູ້ໝັ້ນຄົງ

## ໔. ໂມຄະຣາດເຖຣະຄາຖາ

## ພາສິດຂອງພຣະສາດສະດາຕັດຖາມພຣະໂມຄະຣາດເຖຣະ

(ພຣະສາດສະດາຕັດຖາມພຣະໂມຄະຣາດເຖຣະ ດ້ວຍພຣະຄາຖາທີ ໑ ວ່າ)

[໔໐໗] ໂມຄະຣາດຜູ້ມີຜິວພັນເສົ້າໝອງ ແຕ່ມີຈິດດີງາມ
ທ່ານເປັນພິກຂຸມີຈິດຕັ້ງໝັ້ນເນືອງນິດ
ຈະເຮັດແນວໃດຕະຫຼອດຣາຕີການ

ທີ່ໜາວເນັບໃນລະດູເໝັນ
ພຣະໂມຄະຣາດເຖຣະ (ເມື່ອຈະທູນຕອບພຣະສາດສະດາ
ຈຶ່ງໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ)

[໔໐໗] ຂ້າພຣະອົງໄດ້ຟັງມາວ່າ
ຊາວມະຄົດກ່ຽວເຂົ້າສຳເລັດຮຽບຮ້ອຍແລ້ວ
ຂ້າພຣະອົງເພິ່ງຄຸມກາຍດ້ວຍຟາງແລ້ວນອນ
ຄືກັບພິກຂຸເຫຼົ່າອື່ນ ຜູ້ມີຄວາມເປັນຢູ່ສະບາຍ

# ໕. ວິສາຂະປັນຈາລິປຸດຕະເຖຣະຄາຖາ

## ພາສິດຂອງພຣະວິສາຂະປັນຈາລິບຸດເຖຣະ

(ພຣະວິສາຂະປັນຈາລິບຸດເຖຣະເມື່ອຈະບອກລັກສະນະຂອງພຣະທຳມະກະຖຶກແກ່ພິກຂຸທັງຫຼາຍ
ຈຶ່ງໄດ້ກ່າວ ໒ ຄາຖາໄວ້ດັ່ງນີ້ວ່າ)

[໔໐໙] (ພຣະທຳມະກະຖຶກປະກອບດ້ວຍອົງ ໕ ເຫຼົ່ານີ້ ຄື)
໑. ບໍ່ເພິ່ງຍົກຕົນ
໒. ບໍ່ຂົ່ມຜູ້ອື່ນ
໓. ບໍ່ເພິ່ງແນມເບິ່ງດ້ວຍຄວາມດູຖູກ
໔. ບໍ່ເພິ່ງກະທົບທ່ານຜູ້ເຖິງຝັ່ງນິບພານ
໕. ບໍ່ເພິ່ງກ່າວຄຸນຄວາມດີຂອງຕົນໃນບ່ອນຊຸມຊົນ
ບໍ່ຟຸ້ງຊ່ານ ກ່າວແຕ່ພໍປະມານ ມີຂໍ້ວັດປະຕິບັດດີງາມ

[໔໑໐] ພຣະທຳມະກະຖຶກນັ້ນມັກເຫັນເນື້ອຄວາມອັນສຸຂຸມແລະລະອຽດຍິ່ງ
ມີປັນຍາສະຫຼຽວສະຫຼາດ ປະພຶດອ່ອນນ້ອມຖ່ອມຕົນຢູ່ສະເໝີ
ປະຕິບັດຕາມສີນຂອງພຣະພຸດທະເຈົ້າເປັນອາຈິນ
ເພິ່ງໄດ້ນິບພານບໍ່ຍາກເລີຍ

# ໖. ຈູລະກະເຖຣະຄາຖາ

## ພາສິດຂອງພຣະຈູລະກະເຖຣະ

(ພຣະຈູລະກະເຖຣະ ເມື່ອຈະເຮັດຕົນໃຫ້ເກີດອຸດສາຫະໃນການຈະເລີນພາວະນາ ຈຶ່ງໄດ້ກ່າວ ໒ ຄາຖາໄວ້ດັ່ງນີ້ວ່າ)

[໔໑໑] ນົກຍູງທັງຫຼາຍ ມີທອນງາມ ຂົນຫາງງາມ
ສ້ອຍຄໍຂຽວງາມ ສົບແຫຼມງາມ
ມີສຽງມ່ວນ ສົ່ງສຽງຮ້ອງຢູ່
ອັນໜຶ່ງ ແມ່ນແຜ່ນດິນໃຫຍ່ນີ້ມີຫຍ້າຂຽວຊະອຸ່ມ
ມີນໍ້າຊຸ່ມຊື່ນ ທ້ອງຟ້າກໍມີກ້ອນເຝື້ອສວຍງາມ

[໔໑໒] ທ່ານມີສະພາວະທີ່ຄວນແກ່ວຽກງານ
ຈົ່ງເພ່ງຊານທີ່ພຣະໂຍຄາວະຈອນຜູ້ມີໃຈດີເພ່ງແລ້ວ
ຈົ່ງເປັນຜູ້ມີຄວາມພະຍາຍາມບໍ່ຍັບຍັ້ງ
ໃນພຣະສາດສະໜາຂອງພຣະສໍາມາສໍາພຸດທະເຈົ້າດ້ວຍດີ
ຈົ່ງບັນລຸນິບພານອັນເປັນທໍາສູງສຸດ
ຂາວສະອາດ ຜຸດຜ່ອງ ລະອຽດ
ເຫັນໄດ້ແສນຍາກເປັນສະພາບທີ່ແນ່ນອນນັ້ນເທີ້ນ

## ໗. ອະນູປະມະເຖຣະຄາຖາ

### ພາສິດຂອງພຣະອະນູປະມະເຖຣະ

(ພຣະອະນູປະມະເຖຣະກ່າວສອນຕົນເອງດ້ວຍ ໔ ຄາຖາໄວ້ດັ່ງນີ້ວ່າ)

[໔໑໓] ຈິດທີ່ມີຄວາມເພີດເພີນ
ຖືກກໍາກິເລດຍົກຂຶ້ນສູ່ພົບເຊິ່ງເປັນເຊັ່ນກັບຫຼາວ
ທ່ານເວັ້ນຈາກພົບທີ່ຮຽກວ່າຫຼາວ
ແລະການມະຄຸນທີ່ຮຽກວ່າໄມ້ຄ້ອນນັ້ນ ໆ ສາ

[໔໑໔] ເຮົາກ່າວອະກຸສົນຈິດນັ້ນວ່າເປັນຈິດມີໂທດ
ກ່າວອະກຸສົນຈິດນັ້ນວ່າເປັນຈິດປະທຸດສະຮ້າຍ
ພຣະສາດສະດາທີ່ບຸກຄົນຫາໄດ້ໂດຍຍາກ ທ່ານກໍໄດ້ແລ້ວ
ທ່ານຢ່ານາຊັກຊວນເຮົາໃນທາງສູນຫາຍເລີຍ

## ໘. ວັດຊິຕະເຖຣະຄາຖາ

### ພາສິດຂອງພຣະວັດຊິຕະເຖຣະ

(ພຣະວັດຊິຕະເຖຣະຣະນຶກຊາດກ່ອນຂອງຕົນໄດ້ ຈຶ່ງໄດ້ກ່າວ ໔ ຄາຖາໄວ້ດັ່ງນີ້ວ່າ)

[໔໑໕] ເຮົາເປັນປຸຖຸຊົນມືດມົນຢູ່ ເມື່ອບໍ່ເຫັນອະຣິຍະສັດ
ຈຶ່ງໄດ້ທ່ອງທ່ຽວວົນວຽນໄປມາໃນຄະຕິທັງຫຼາຍຕະຫຼອດການລະນານ

[໔໑໖] ເຮົານັ້ນບໍ່ຜະໝາດແລ້ວ
ກໍາຈັດກໍາກິເລດທີ່ໄດ້ຊື່ວ່າສົງສານໄດ້ແລ້ວ
ເຮົາຕັດຄະຕິທັງປວງຂາດແລ້ວ ບັດນີ້ບໍ່ມີການເກີດອີກ

## ໙. ສັນທິຕະເຖຣະຄາຖາ

## ພາສິດຂອງພຣະສັນທິຕະເຖຣະ

(ພຣະສັນທິຕະເຖຣະເມື່ອຈະປະກາດການບັນລຸຄຸນວິເສດຂອງຕົນ ຈຶ່ງໄດ້ກ່າວ ໒ ຄາຖາ ໄວ້ດັ່ງນີ້ວ່າ)

[໔໑໗] ເຮົາມີສະຕິຕັ້ງໝັ້ນໄດ້ສັນຍາແນວໜຶ່ງ
ເຊິ່ງປະກອບດ້ວຍພຸດທານຸສະຕິ ທີ່ເຫງົ້າຕົ້ນອັດສັດຖະພຶກ
ສະຫວ່າງສະໄຫວໄປດ້ວຍຣັດສະໝີສີຂຽວ ງາມສະພັ່ງ

[໔໑໘] ໃນກັບທີ ໓໑ ແຕ່ພັດທະກັບນີ້ໄປ
ເຮົາໄດ້ເຖິງຄວາມສິ້ນອາສະວະແລ້ວ
ຍ້ອນນໍາສັນຍາທີ່ເຮົາໄດ້ໃນຄັ້ງນັ້ນມາ

**ປັນຈະມະວັກ ຈົບ**

## ລວມເລື້ອງພຣະເຖຣະທີ່ມີໃນວັກນີ້ ຄື

໑. ພຣະກຸມານກັດສະປະເຖຣະ
໒. ພຣະທໍາມະປາລະເຖຣະ
໓. ພຣະພິມມາລິເຖຣະ
໔. ພຣະໂມຄະຣາດເຖຣະ
໕. ພຣະວິສາຂະປັນຈາລິບຸດເຖຣະ
໖. ພຣະຈູລະກະເຖຣະ
໗. ພຣະອະນູປະມະເຖຣະ
໘. ພຣະວັດຊິຕະເຖຣະ
໙. ພຣະສັນທິຕະເຖຣະ ຜູ້ນໍາທຸລິຄືກິເລດອອກໄດ້

ໃນທຸກະນິບາດ ລວມຄາຖາໄດ້ ໙໘ ຄາຖາ
ແລະລວມພຣະເຖຣະຜູ້ສະຫຼາດໃນໄນຍະ ເຊິ່ງກ່າວຄາຖາໄວ້ໄດ້ ໔໙ ອົງ

**ທຸກະນິບາດ ຈົບ**

# ໓. ຕິກະນິບາດ

## ໑. ອັງຄະນິກະພາຣະທະວາຊະເຖຣະຄາຖາ

### ພາສິດຂອງພຣະອັງຄະນິກະພາຣະທະວາຊະເຖຣະ

(ພຣະອັງຄະນິກະພາຣະທະວາຊະເຖຣະເມື່ອຈະພະຍາກອນພຣະອະຣະຫັດ ຈຶ່ງໄດ້ກ່າວ ໓ ຄາຖາໄວ້ດັ່ງນີ້ວ່າ)

[໔໑໙] ເມື່ອເຮົາສະແຫວງຫາຄວາມບໍລິສຸດໂດຍອຸບາຍບໍ່ສົມຄວນ
ຈຶ່ງໄດ້ປິ່ນເປີໄຟຢູ່ໃນປ່າ
ເຮົາບໍ່ຮູ້ທາງອັນບໍລິສຸດ
ຈຶ່ງໄດ້ພ່ຳເພັງຕະບະແນວອື່ນອີກ

[໔໔໐] ຄວາມສຸກນັ້ນເຮົາໄດ້ແລ້ວໂດຍງ່າຍ
ຂໍທ່ານຈົ່ງແນມເຫັນທຳວ່າເປັນທຳດີງາມ
ເຮົາບັນລຸວິດຊາ ໓ ໄດ້ເຮັດຕາມຄຳສັ່ງສອນຂອງພຣະພຸດທະເຈົ້າແລ້ວ

[໔໔໑] ແຕ່ກ່ອນ ເຮົາໄດ້ເປັນເຜົ່າພັນແຫ່ງພຣະພົມ
ແຕ່ບັດນີ້ ເຮົາເປັນພາມ ບັນລຸວິດຊາ ໓
ລ້າງມົນທິນຄືກິເລດໄດ້ແລ້ວ
ແລະເປັນພາມຈົບໄຕຣເພດ

## ໔. ປັດຈະຍະເຖຣະຄາຖາ

### ພາສິດຂອງພຣະປັດຈະຍະເຖຣະ

(ພຣະປັດຈະຍະເຖຣະເມື່ອຈະພະຍາກອນພຣະອະຣະຫັດ ຈຶ່ງໄດ້ກ່າວ ໓ ຄາຖາໄວ້ດັ່ງນີ້ວ່າ)

[໔໔໔] ເຮົາບວດແລ້ວໄດ້ ໕ ມື້
ຍັງເປັນເສຂະບຸກຄົນຢູ່
ຍັງບໍ່ໄດ້ບັນລຸພຣະອະຣະຫັດ
ເມື່ອເຮົາເຂົ້າໄປສູ່ວິຫານແລ້ວໄດ້ຕັ້ງໃຈປາຖະໜາວ່າ

[໘໘໓] ເມື່ອເຮົາຍັງຖອນລູກສອນຄືຕັນຫາຂຶ້ນບໍ່ໄດ້
ເຮົາຈະບໍ່ກິນ ບໍ່ດື່ມ ບໍ່ອອກໄປຈາກວິຫານ
ທັງຈະບໍ່ເອນກາຍນອນ

[໘໘໔] ເຊີນທ່ານເບິ່ງຄວາມພຽນ
ຄວາມບາກບັ່ນຂອງເຮົານັ້ນຜູ້ຢູ່ຢ່າງນີ້ ເຮົາບັນລຸວິຊາ ໓
ໄດ້ເຮັດຕາມຄຳສັ່ງສອນຂອງພຣະພຸດທະເຈົ້າແລ້ວ
໓. ພາກຸລະເຖຣະຄາຖາ
ພາສິດຂອງພຣະພາກຸລະເຖຣະ

(ພຣະພາກຸລະເຖຣະເມື່ອຈະພະຍາກອນພຣະອະຣະຫັດ ຈຶ່ງໄດ້ກ່າວ ໓ ຄາຖາໄວ້ດັ່ງນີ້ວ່າ)

[໘໘໕] ຜູ້ຕ້ອງການຈະເຮັດກິດທີ່ຄວນເຮັດກ່ອນໃນພາຍຫຼັງ
ຍ່ອມພາດຈາກຖານະທີ່ນຳຄວາມສຸກມາໃຫ້
ແລະຍ່ອມເດືອດຮ້ອນໃນພາຍຫຼັງ

[໘໘໖] ບຸກຄົນເພິ່ງເວົ້າເຖິງສິ່ງທີ່ຕົນເຮັດໄດ້
ບໍ່ເພິ່ງເວົ້າເຖິງສິ່ງທີ່ຕົນເຮັດບໍ່ໄດ້
ບັນດິດທັງຫຼາຍຍ່ອມຮູ້ຈັກບຸກຄົນຜູ້ບໍ່ເຮັດ ດີແຕ່ເວົ້າ

[໘໘໗] ນິບພານທີ່ພຣະສຳມາສຳພຸດທະເຈົ້າຊົງສະແດງແລ້ວ
ເປັນສຸກດີນໍ ບໍ່ມີຄວາມໂສກ
ປາສະຈາກກິເລດຄືທຸລີ ກະເສມ ເປັນທີ່ດັບທຸກໄດ້

# ໔. ທະນິຍະເຖຣະຄາຖາ

## ພາສິດຂອງພຣະທະນິຍະເຖຣະ

(ພຣະທະນິຍະເຖຣະເມື່ອຈະພະຍາກອນພຣະອະຣະຫັດ ຈຶ່ງໄດ້ກ່າວ ໓ ຄາຖາໄວ້ດັ່ງນີ້ວ່າ)

[໘໘໘] ຖ້າພິກຂຸມຸ້ງຫວັງໃນຄວາມເປັນສະມະນະ
ປາຖະໜາຈະເປັນຢູ່ສະບາຍ
ບໍ່ຄວນດູໝິ່ນຈີວອນ ເຂົ້າ ແລະນ້ຳອັນເປັນຂອງສົງ

[໘໘໙] ຖ້າພິກຂຸມຸ້ງຫວັງໃນຄວາມເປັນສະມະນະ

ປາຖະໜາຈະເປັນຢູ່ສະບາຍ
ເພິ່ງໃຊ້ສອຍບ່ອນນອນບ່ອນນັ່ງ
ຄືງອາໄສຮູໝູ່ຢູ່

[໔໓໐] ຖ້າພິກຂຸມຸ້ງຫວັງໃນຄວາມເປັນສະມະນະ
ປາຖະໜາຈະເປັນຢູ່ສະບາຍ
ເພິ່ງຍິນດີດ້ວຍປັດໄຈຕາມມີຕາມໄດ້
ແລະເພິ່ງຈະເລີນທຳອັນເອກ[๑]

## ๕. ມາຕັງຄະປຸດຕະເຖຣະຄາຖາ

### ພາສິດຂອງພຣະມາຕັງຄະບຸດເຖຣະ

(ພຣະມາຕັງຄະບຸດເຖຣະເມື່ອຈະຕິຕຽນຄວາມຂີ້ຄ້ານແລະຍ້ອງຍໍການຜາຣົບຄວາມພຽນ ຈຶ່ງໄດ້ກ່າວ ๓ ຄາຖາໄວ້ດັ່ງນີ້ວ່າ)

[໔໓໑] ຂະນະທັງຫຼາຍຍ່ອມລ່ວງເລີຍມານົບທັງຫຼາຍ
ຜູ້ລະຖິ້ມວຽກງານດ້ວຍອ້າງວ່າ ເວລານີ້
ໜາວໂພດ ຮ້ອນໂພດ ເປັນເວລາຄ່ຳໂພດ

[໔໓໒] ສ່ວນຜູ້ບໍ່ຄຳນຶງເຖິງຄວາມໜາວແລະຄວາມຮ້ອນຍິ່ງໄປກວ່າຫຍ້າ
ເຮັດໜ້າທີ່ຂອງຄົນຢູ່
ຍ່ອມບໍ່ເສື່ອມຈາກຄວາມສຸກ

[໔໓໓] ເຮົາຈະໃຊ້ເອິກຜ່າຫຍ້າແພກ ຫຍ້າຄາ ຫຍ້າດອກເລົາ
ຫຍ້າແຝກ ຫຍ້າມຸ້ງກະຕ່າຍ
ແລະຫຍ້າປ້ອງ ພອກພູນວິເວກ

## ໖. ຂຸດຊະໂສພິຕະເຖຣະຄາຖາ

### ພາສິດຂອງພຣະຂຸດຊະໂສພິຕະເຖຣະ

(ພຣະຂຸດຊະໂສພິຕະເຖຣະເມື່ອຈະບອກຄວາມປະສົງທີ່ຕົນມາແກ່ເທວະດາ ຈຶ່ງໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ)

[໔໓໔] ສະມະນະທັງຫຼາຍເຫຼົ່າໃດ
ກ່າວທຳໄດ້ຢ່າງວິຈິດ
ເປັນພະຫູສູດ ເປັນຊາວເມືອງປາຕະລີບຸດ
ທ່ານຂຸດຊະໂສພິຕະນີ້ເປັນອົງໜຶ່ງ
ໃນພິກຂຸເຫຼົ່ານັ້ນ ຜູ້ຢືນຢູ່ທີ່ປະຕູຖ້ຳ

(ເທວະດາ ເມື່ອຈະປະກາດເລື້ອງທີ່ພຣະເຖຣະມາໃຫ້ສົງຮູ້ ຈຶ່ງໄດ້ກ່າວຄາຖາໄວ້ດັ່ງນີ້ວ່າ)

[໔໓໕] ສະມະນະທັງຫຼາຍເຫຼົ່າໃດ
ກ່າວທຳໄດ້ຢ່າງວິຈິດ
ເປັນພະຫູສູດ ເປັນຊາວເມືອງປາຕະລີບຸດ
ທ່ານຂຸດຊະໂສພິຕະນີ້ເປັນພິກຂຸອົງໜຶ່ງ ໃນພິກຂຸເຫຼົ່ານັ້ນ
ມາຢືນຢູ່ທີ່ປະຕູຖ້ຳໄດ້ ຄືລົມພັດມາ

(ພຣະເຖຣະພະຍາກອນພຣະອະຣະຫັດດ້ວຍຄາຖານີ້ວ່າ)

[໔໓໖] ຂຸດຊະໂສພິຕະພິກຂຸນີ້ ໄດ້ຮັບຄວາມສຸກດ້ວຍອາການເຫຼົ່ານີ້
ຄື ດ້ວຍການຮົບດີ ການບູຊາດີ ການຊະນະສົງຄາມ
ແລະການປະພຶດພົມມະຈັນປະຈຳ
໗. ວາຣະນະເຖຣະຄາຖາ
ພາສິດຂອງພຣະວາຣະນະເຖຣະ

(ພຣະຜູ້ມີພຣະພາກເຈົ້າເມື່ອປະທານໂອວາດແກ່ພຣະວາຣະນະເຖຣະ ຈຶ່ງໄດ້ຕັດ ໓ ຄາຖາໄວ້ດັ່ງນີ້ວ່າ)

[໔໓໗] ໃນໝູ່ມະນຸດນີ້ ນໍຣະຊົນຜູ້ໃດຜູ້ໜຶ່ງບຽດບຽນສັດອື່ນ
ນໍຣະຊົນນັ້ນຍ່ອມເສື່ອມຈາກຄວາມສຸກ
ໃນໂລກທັງສອງ ຄື ໂລກນີ້ແລະໂລກໜ້າ
[໔໓໘] ສ່ວນນໍຣະຊົນໃດມີຈິດເມດຕາ ຊ່ວຍເຫຼືອສັດທຸກໝູ່ເຫຼົ່າ
ນໍຣະຊົນແນວນີ້ນັ້ນຍ່ອມປະສົບບຸນຫຼາຍ
[໔໓໙] ບຸກຄົນຄວນສຶກສາຄຳສຸພາສິດ
ການເຂົ້າໄປນັ່ງໃກ້ສະມະນະ
ການຢູ່ຜູ້ດຽວໃນບ່ອນລັບ
ແລະທຳເປັນເຄື່ອງສະງົບລະງັບຈິດ

໗. ປັດສິກະເຖຣະຄາຖາ

ພາສິດຂອງພຣະປັດສິກະເຖຣະ

(ພຣະປັດສິກະເຖຣະເມື່ອຂາບທູນພຣະສາດສະດາເຖິງອຸປະກາຣະທີ່ຕົນເຮັດແກ່ພວກຍາດ ຈຶ່ງໄດ້ກ່າວ ໓ ຄາຖາໄວ້ດັ່ງນີ້ວ່າ)

[໒໔໐] ຄົນມີສັດທາ ມີປັນຍາດີ ຕັ້ງຢູ່ໃນທຳ
ມີສິນສົມບູນ ແມ່ນພຽງຄົນດຽວ
ຍ່ອມມີປະໂຫຍດແກ່ຍາດແລະໝູ່ກອງທັງຫຼາຍຜູ້ບໍ່ມີສັດທາ

[໒໔໑] ຍາດທັງຫຼາຍຖືກເຮົາຜູ້ມີຄວາມຮັກຍາດແລະໝູ່ກອງ
ແນະນຳຕັກເຕືອນແລ້ວດ້ວຍຄວາມອີດູ
ຈຶ່ງເຮັດສັກກາຣະບູຊາໃນພິກຂຸທັງຫຼາຍ

[໒໔໒] ຍາດເຫຼົ່ານັ້ນຕາຍລ່ວງລັບໄປ
ໄດ້ຮັບຄວາມສຸກໃນເທບຊັ້ນຕາວະຕິງສາ
ພີ່ນ້ອງຊາຍແລະມານດາຂອງຂ້າພຣະອົງ
ພັ່ງພ້ອມດ້ວຍກາມມະຄຸນຕາມທີ່ປາຖະໜາ ບັນເທີງຢູ່

## ໘. ຍະໂສຊະເຖຣະຄາຖາ

### ພາສິດຂອງພຣະຍະໂສຊະເຖຣະ

(ພຣະຜູ້ມີພຣະພາກເຈົ້າເມື່ອຈະຊົງສັນເສີນພຣະຍະໂສຊະເຖຣະວ່າ ເປັນຜູ້ມີຄວາມປາຖະໜາ ໜ້ອຍຢ່າງຍິ່ງ ຈຶ່ງໄດ້ຕັດພຣະຄາຖານີ້ວ່າ)

[໒໔໓] ນໍຣະຊົນຜູ້ຮູ້ປະມານໃນເຂົ້າແລະນ້ຳ ຍ່ອມຈ່ອຍແຫ້ງ
ມີໂຕສະພັ່ງດ້ວຍເສັ້ນເອັນຄ້າຍເຄືອຢານາງ ແຕ່ມີໃຈບໍ່ທຍໍ້ທໍ້

(ພຣະຍະໂສຊະເຖຣະເມື່ອກ່າວສອນທຳແກ່ພິກຂຸທັງຫຼາຍ ຈຶ່ງໄດ້ກ່າວ ໒ ຄາຖາໄວ້ດັ່ງນີ້ວ່າ)

[໒໔໔] ພິກຂຸຖືກເຮືອດແລະຍຸງກັດໃນປ່າໃຫຍ່
ເພິ່ງເປັນຜູ້ມີສະຕິອົດກັ້ນໃນອັນຕະລາຍນັ້ນ
ຄືຊ້າງໃນສົງຄາມ

[໒໔໕] ພິກຂຸຢູ່ຜູ້ດຽວ ເປັນຄືພົມ

ຢູ່ ໔ ອົງຄືເທບ
ຢູ່ ໓ ອົງຄືຊາວບ້ານ
ຢູ່ຫຼາຍກວ່ານັ້ນ ຍ່ອມມີຄວາມໂກລາຫົນຫຼາຍຂຶ້ນ

## ໑໐. ສາຕິມັດຕິຍະເຖຣະຄາຖາ

### ພາສິດຂອງພຣະສາຕິມັດຕິຍະເຖຣະ

(ສາຕິມັດຕິຍະເຖຣະເມື່ອກ່າວສອນທຳແກ່ເຈົ້າຂອງເຮືອນນັ້ນ ຈຶ່ງໄດ້ກ່າວ ໓ ຄາຖາໄວ້ດັ່ງນີ້ວ່າ)

[໔໕໖] ແຕ່ກ່ອນ ທ່ານມີສັດທາ
(ແຕ່)ມື້ນີ້ ທ່ານບໍ່ມີສັດທາ
ສິ່ງໃດເປັນຂອງທ່ານ ຂໍສິ່ງນັ້ນຈົ່ງເປັນຂອງທ່ານຕາມເກົ່າເທີ້ນ
ເຮົາບໍ່ມີຄວາມທຸດຈະຣິດ

[໔໕໗] ຍ້ອນສັດທາບໍ່ທ່ຽງ ຄອນແຄນ
ສັດທານັ້ນ ເຮົາເຫັນມາແລ້ວແນວນັ້ນ
ຄົນທັງຫຼາຍຮັກງ່າຍໜ່າຍໄວ
ໃນຄວາມຮັກແລະຄວາມໜ່າຍນັ້ນ ພຣະມຸນີຈະຊະນະໄດ້ແນວໃດ

[໔໕໘] ຄົນທັງຫຼາຍຍ່ອມຫຸງອາຫານໄວ້ເພື່ອມຸນີ
ທຸກຕະກູນ ຕະກູນລະໜ້ອຍລະໜ້ອຍ
ເຮົາຈະທ່ຽວບິນທະບາດດ້ວຍລຳແຂ່ງ ຍ້ອນກຳລັງແຂ່ງຂອງເຮົາຍັງມີຢູ່

## ໑໑. ອຸປາລີເຖຣະຄາຖາ

### ພາສິດຂອງພຣະອຸປາລີເຖຣະ

(ພຣະອຸປາລີເຖຣະເມື່ອກ່າວສອນພິກຂຸທັງຫຼາຍ ຈຶ່ງໄດ້ກ່າວ ໓ ຄາຖາໄວ້ດັ່ງນີ້ວ່າ)

[໔໕໙] ພິກຂຸອອກບວດໃໝ່ດ້ວຍສັດທາ ຍັງໃໝ່(ຕໍ່ການສິກສາ)
ເພິ່ງຄົບກັນລະຍານະມິດຜູ້ມີອາຊີວະບໍລິສຸດ ບໍ່ຂີ້ຄ້ານ

[໔໖໐] ພິກຂຸອອກບວດໃໝ່ດ້ວຍສັດທາ ຍັງໃໝ່ຢູ່ໃນໝູ່ສົງ
ເພິ່ງເປັນຜູ້ສະຫຼາດສິກສາພຣະວິໄນ

[໔໕໑] ພິກຂຸອອກບວດໃໝ່ດ້ວຍສັດທາ ຍັງໃໝ່
ເພິ່ງເປັນຜູ້ສະຫຼາດໃນສິ່ງທີ່ຄວນແລະບໍ່ຄວນ
ບໍ່ຄວນປະພຶດຕົນເປັນຄົນອອກໜ້າອອກຕາ

## ໑໘. ອຸດຕະຣະປາລະເຖຣະຄາຖາ

### ພາສິດຂອງພຣະອຸດຕະຣະປາລະເຖຣະ

(ພຣະອຸດຕະຣະປາລະເຖຣະໄດ້ກ່າວ ໓ ຄາຖາໄວ້ດັ່ງນີ້ວ່າ)

[໔໕໒] ປັນຈະກາມະຄຸນເຊິ່ງເຮັດໃຈໃຫ້ລຸ້ມຫຼົງ
ໄດ້ເຮັດເຮົາຜູ້ເປັນບັນດິດ ສະງົບ
ສາມາດຄົ້ນຄວ້າປະໂຫຍດໄດ້ ໃຫ້ຕົກຢູ່ໃນໂລກ

[໔໕໓] ເຮົາໄດ້ຕົກໄປໃນອຳນາດແຫ່ງມານ
ຖືກລູກສອນຄືຣາຄະສຽບຕິດແໜ້ນ
ກໍຍັງສາມາດປົດຕົນຈາກບ້ວງມັດຈຸຣາດໄດ້

[໔໕໔] ກາມທັງປວງເຮົາລະໄດ້ແລ້ວ
ພົບທັງປວງເຮົາທຳລາຍໄດ້ແລ້ວ
ການວຽນວ່າຍຕາຍເກີດສິ້ນໄປແລ້ວ
ບັດນີ້ ບໍ່ມີການເກີດອີກ

## ໑໙. ອະພິພູຕະເຖຣະຄາຖາ

### ພາສິດຂອງພຣະອະພິພູຕະເຖຣະ

(ພຣະອະພິພູຕະເຖຣະໄດ້ກ່າວ ໓ ຄາຖາໄວ້ດັ່ງນີ້ວ່າ)

[໔໕໕] ຂໍເຊີນຍາດທັງຫຼາຍທໍ່ທີ່ມາປະຊຸມກັນໃນສະມາຄົມນີ້ທັງໝົດ
ໂຜດຕັ້ງໃຈຟັງ ເຮົາຈັກສະແດງທຳໂຜດທ່ານທັງຫຼາຍ
ການເກີດຢູ່ເລື້ອຍ ໆ ເປັນທຸກ

[໔໕໖] ຂໍທ່ານທັງຫຼາຍຈົ່ງພາກພຽນ ບາກບັ່ນ
ຂົນຂວາຍໃນຄຳສອນຂອງພຣະພຸດທະເຈົ້າ

ກຳຈັດເສນາຂອງພະຍາມັດຈຸຣາດສາ
ຄືກຸນຊອນທຳລາຍເຮືອນໄມ້ອໍ້

[໘໕໗] ຜູ້ບໍ່ຜະໝາດຢູ່ໃນພຣະທຳວິໄນນີ້
ຈະລະການວຽນວ່າຍຕາຍເກີດ ແລ້ວເຮັດບ່ອນສຸດທຸກໄດ້

## ໑໔. ໂຄຕະມະເຖຣະຄາຖາ

### ພາສິດຂອງພຣະໂຄຕະມະເຖຣະ

(ພຣະໂຄຕະມະເຖຣະສະແດງທຳດ້ວຍ ໓ ຄາຖາໄວ້ດັ່ງນີ້ວ່າ)

[໘໕໘] ເຮົາເມື່ອຍັງທ່ອງທ່ຽວໄປມາໄດ້ໄປຕົກນະຣົກແດ່
ໄດ້ໄປຖືປະຕິສົນທິຍັງເປຕະໂລກແດ່
ໃນກຳເນີດສັດເດຍຣັດສານອັນມີແຕ່ທຸກແດ່
ເຮົາສະເຫວີຍທຸກຢູ່ຫຼາຍປະການມາເປັນເວລາດົນ

[໘໕໙] ແມ່ນອັດຕະພາບມະນຸດ ເຮົາກໍຜ່ານມາຫຼາຍແລ້ວ
ເຮົາໄດ້ໄປສະຫວັນເປັນລາງເທື່ອ
ແລະໄດ້ດຳລົງຢູ່ໃນຮູບພົບ ອະຮູບພົບ
ເນວະສັນຍີນາສັນຍີພົບ (ແລະ) ອະສັນຍີພົບ

[໘໖໐] ເຮົາຮູ້ແຈ່ມແຈ້ງພົບທັງຫຼາຍອັນຫາແກ່ນສານບໍ່ໄດ້
ຖືກປັດໄຈປຸງແຕ່ງ ບໍ່ໝັ້ນຍືນ ປ່ຽນແປງຕະຫຼອດເວລາ
ເມື່ອຮູ້ແຈ້ງພົບນັ້ນອັນເກີດໃນຕົນແລ້ວ
ຈຶ່ງເປັນຜູ້ມີສະຕິ ໄດ້ບັນລຸສັນຕິທຳທີ່ແທ້ຈິງຈິງ

## ໑໕. ຫາຣິຕະເຖຣະຄາຖາ

### ພາສິດຂອງພຣະຫາຣິຕະເຖຣະ

(ພຣະຫາຣິຕະເຖຣະເມື່ອຈະພະຍາກອນພຣະອະຣະຫັດ ຈຶ່ງໄດ້ກ່າວ ໓ ຄາຖາໄວ້ດັ່ງນີ້ວ່າ)

[໘໖໑] ຜູ້ຕ້ອງການຈະເຮັດກິດທີ່ຄວນເຮັດກ່ອນໃນພາຍຫຼັງ
ຍ່ອມພາດຈາກຖານະທີ່ນຳຄວາມສຸກມາໃຫ້

ແລະຍ່ອມເດືອດຮ້ອນໃນພາຍຫຼັງ

[໔໒໔] ບຸກຄົນເພິ່ງເວົ້າເຖິງສິ່ງທີ່ຕົນເຮັດໄດ້
ບໍ່ເພິ່ງເວົ້າເຖິງສິ່ງທີ່ຕົນເຮັດບໍ່ໄດ້
ບັນດິດຍ່ອມຮູ້ຈັກບຸກຄົນຜູ້ບໍ່ເຮັດ ດີແຕ່ເວົ້າ

[໔໒໓] ນິບພານທີ່ພຣະສຳມາສຳພຸດທະເຈົ້າຊົງສະແດງແລ້ວ
ເປັນສຸກດີນໍ ບໍ່ມີຄວາມໂສກ ປາສະຈາກກິເລດຄືທຸລີ
ກະເສມ ເປັນບ່ອນດັບທຸກໄດ້

## ໑໒. ວິມະລະເຖຣະຄາຖາ

### ພາສິດຂອງພຣະວິມະລະເຖຣະ

(ພຣະວິມະລະເຖຣະໄດ້ກ່າວ ໓ ຄາຖາໄວ້ດັ່ງນີ້ວ່າ)

[໔໒໔] ຜູ້ປາຖະໜາຄວາມສຸກທີ່ໝັ້ນຍືນ
ເພິ່ງເວັ້ນປາປະມິດສາໃຫ້ໄກ
ຄົບຫາແຕ່ຄົນດີ ແລະເພິ່ງຢູ່ໃນໂອວາດຂອງທ່ານ

[໔໒໕] ບຸກຄົນເກາະຂອນໄມ້ນ້ອຍ ໆ ຍ່ອມຈົມລົງໃນມະຫາສະມຸດ ສັນໃດ
ບຸກຄົນແມ່ນມີຄວາມເປັນຢູ່ດີ ອາໄສຄົນຂີ້ຄ້ານ
ກໍຈົມລົງໃນສັງສາຣະວັດໄດ້ ສັນນັ້ນ
ຍ້ອນແນວນັ້ນ ບຸກຄົນຄວນເວັ້ນຄົນຂີ້ຄ້ານ
ມີຄວາມພຽນຫຍ່ອນຍານສາ

[໔໒໒] ບຸກຄົນເພິ່ງຢູ່ຮ່ວມກັບເຫຼົ່າບັນດິດຜູ້ສະຫງັດ ເປັນອະຣິຍະ
ມີໃຈເດັດດ່ຽວ ເຂົ້າຊານຢູ່ ຜາຣົບຄວາມພຽນຢູ່ປະຈຳ

**ຕິກະນິບາດ ຈົບ**

## ລວມເລື້ອງພຣະເຖຣະທີ່ມີໃນນິບາດນີ້ ຄື

໑. ພຣະອັງຄະນິກະພາຣະທະວາຊະເຖຣະ
໒. ພຣະພາກຸລະເຖຣະ
໓. ພຣະປັດຈະຍະເຖຣະ
໔. ພຣະທະນິຍະເຖຣະ

໕. ພຣະມາຕັງຄະບຸດເຖຣະ
໗. ພຣະວາຣະນະເຖຣະ
໙. ພຣະຍະໂສຊະເຖຣະ
໑໑. ພຣະອຸປາລີເຖຣະ
໑໓. ພຣະອະພິພູຕະເຖຣະ
໑໕. ພຣະພາຣິຕະເຖຣະ
໖. ພຣະຊຸດຊະໂສພິຕະເຖຣະ
໘. ພຣະປັດສິກະເຖຣະ
໑໐. ພຣະສາຕິມັດຕິຍະເຖຣະ
໑໒. ພຣະອຸດຕະຣະປາລະເຖຣະ
໑໔. ພຣະໂຄຕະມະເຖຣະ
໑໖. ພຣະວິມະລະເຖຣະ

ໃນຕິກະນິບາດ ລວມພຣະເຖຣະໄດ້ ໑໖ ອົງ

ລວມຄາຖາໄດ້ ໔໘ ຄາຖາ ດັ່ງນີ້ແລ

# ໔. ຈະຕຸກກະນິບາດ

## ໑. ນາຄະສະມາລະເຖຣະຄາຖາ

### ພາສິດຂອງພຣະນາຄະສະມາລະເຖຣະ

(ພຣະນາຄະສະມາລະເຖຣະພະຍາກອນພຣະອະຣະຫັດດ້ວຍ ໔ ຄາຖາໄວ້ດັ່ງນີ້ວ່າ)

[໔໖໗] ຍິງນັກຟ້ອນຕົກແຕ່ງຮ່າງກາຍນຸ່ງຜ້າສວຍງາມ
ທັດຊີງດອກໄມ້ ລູບທາດ້ວຍຈຸນແກ່ນຈັນ
ຟ້ອນລຳຢູ່ໃນທ່າມກາງຖະໜົນຫຼວງ ເມື່ອດົນຕີບັນເລງຢູ່

[໔໖໘] ເມື່ອເຮົາຍ່າງເຂົ້າໄປບິນທະບາດ
ໄດ້ເຫັນນາງຜູ້ຕົກແຕ່ງຮ່າງກາຍ ນຸ່ງຜ້າສວຍງາມ
ຄືບ້ວງມັດຈຸຣາດທີ່ວາງດັກໄວ້

[໔໖໙] ຈາກນັ້ນ ໂຍນິໂສມະນະສິການຈຶ່ງເກີດຂຶ້ນແກ່ເຮົາ ໂທດກໍຜາກົດ
ຄວາມເບື່ອໜ່າຍກໍເກີດຂຶ້ນພ້ອມກັນ

[໔໗໐] ຕໍ່ແຕ່ນັ້ນ ຈິດຂອງເຮົາກໍລຸດພົ້ນ
ທ່ານຈົ່ງແນມເຫັນທຳວ່າເປັນທຳດີງາມ
ເຮົາບັນລຸວິດຊາ ໓ ໄດ້ເຮັດຕາມຄຳສັ່ງສອນຂອງພຣະພຸດທະເຈົ້າແລ້ວ

# ໔. ພະຄຸເຖຣະຄາຖາ

## ພາສິດຂອງພຣະພະຄຸເຖຣະ

(ພຣະພະຄຸເຖຣະໄດ້ກ່າວ ໔ ຄາຖາໄວ້ດັ່ງນີ້ວ່າ)

[໔໗໑] ເຮົາຖືກຄວາມງ້ວງເຫງົາຫາວນອນຄອບງຳ
ໄດ້ອອກໄປຈາກບ່ອນຢູ່ ກຳລັງຂຶ້ນບ່ອນຈົງກົມ
ໄດ້ລົ້ມລົງທີ່ພື້ນດິນຊື່ນັ້ນເອງ

[໔໗໔] ເຮົານັ້ນນວດໂຕແລ້ວ ກັບຂຶ້ນບ່ອນຈົງກົມໃໝ່
ມີໃຈຕັ້ງໝັ້ນດີແລ້ວ ໄດ້ຈົງກົມ ຢູ່ບ່ອນຈົງກົມ

[໔໗໓] ຈາກນັ້ນ ໂຍນິໂສມະນະສິການຈຶ່ງເກີດຂຶ້ນແກ່ເຮົາ
ໂທດກໍຜາກົດ ຄວາມເບື່ອໜ່າຍກໍເກີດຂຶ້ນພ້ອມກັນ

[໔໗໔] ຕໍ່ແຕ່ນັ້ນ ຈິດຂອງເຮົາກໍລຸດພົ້ນ
ທ່ານຈົ່ງແນມເຫັນທຳວ່າເປັນທຳດີງາມ
ເຮົາບັນລຸວິດຊາ ໓ ໄດ້ເຮັດຕາມຄຳສັ່ງສອນຂອງພຣະພຸດທະເຈົ້າແລ້ວ

# ໓. ສະພິຍະເຖຣະຄາຖາ

## ພາສິດຂອງພຣະສະພິຍະເຖຣະ

(ພຣະສະພິຍະເຖຣະສະແດງທຳດ້ວຍ ໔ ຄາຖາໄວ້ດັ່ງນີ້ວ່າ)

[໔໗໕] ຊົນເຫຼົ່າອື່ນຍ່ອມບໍ່ຮູ້ວ່າ ພວກເຮົາກຳລັງຍ່ອຍຍັບຢູ່ໃນໂລກນີ້
ບັນດາຊົນເຫຼົ່ານັ້ນ ຊົນເຫຼົ່າໃດຮູ້ແຈ້ງຢູ່
ຄວາມຜິດກັນຖຽງກັນຍ່ອມລະງັບໄດ້ຈາກສຳນັກຂອງຊົນເຫຼົ່ານັ້ນ

[໔໗໖] ເມື່ອພວກທີ່ບໍ່ຮູ້ສຶກ ຍັງປະພຶດຍຶດຖືຢູ່ຄືຈະບໍ່ຕາຍ
ຄວາມຜິດກັນຖຽງກັນຍ່ອມສະງົບລົງບໍ່ໄດ້ເລີຍ
ສ່ວນພວກທີ່ຮູ້ທຳຕາມຄວາມເປັນຈິງ
ຍ່ອມບໍ່ກະສັບກະສ່າຍ
ໃນເມື່ອສັດທັງຫຼາຍກະສັບກະສ່າຍຢູ່

[๘໗໗] ກຳທີ່ຫຍ່ອນຍານ ຂໍ້ວັດປະຕິບັດທີ່ເສົ້າໝອງ
ແລະພົມມະຈັນທີ່ເພິ່ງຣະນຶກເຖິງດ້ວຍຄວາມຣະແວງສົງໄສ
ທຸກຢ່າງນັ້ນບໍ່ມີຜົນຫຼາຍ

[๘໗໘] ຜູ້ໃດບໍ່ມີຄວາມເຄົາລົບໃນເພື່ອນພົມມະຈາຣີທັງຫຼາຍ
ຜູ້ນັ້ນຍ່ອມຫ່າງໄກຈາກພຣະສັດທຳ ຄືຟ້າກັບດິນ

# ๘. ນັນທະກະເຖຣະຄາຖາ

## ພາສິດຂອງພຣະນັນທະກະເຖຣະ

(ພຣະນັນທະກະເຖຣະໄດ້ກ່າວ ๔ ຄາຖາໄວ້ດັ່ງນີ້ວ່າ)

[๘໗໙] ໜ້າຕິຕຽນຮ່າງກາຍຂອງທ່ານ
ທີ່ເຕັມໄປດ້ວຍຂອງໜ້າລັງກຽດ ມີກິ່ນເໝັນ
ເປັນຝັກຝ່າຍຂອງມານ ຊຸ່ມໄປດ້ວຍກິເລດ
ມີປ່ອງ ๙ ປ່ອງ[๑] ເປັນທີ່ໄຫຼອອກແຫ່ງຂອງບໍ່ສະອາດເປັນປະຈຳ

[๘๘๐] ທ່ານຢ່າໄດ້ຄິດເຖິງເລື້ອງເກົ່າ
ຢ່າມາເຍົ້າຍວນພຣະອະຣິຍະສາວົກເລີຍ
ແມ່ນໃນສະຫວັນ ທ່ານເຫຼົ່ານັ້ນກໍຍັງບໍ່ຍິນດີ
ຈະເວົ້າຫຍັງເຖິງກາມມະຄຸນຂອງມະນຸດນໍ

[๘๘໑] ຊົນເຫຼົ່າໃດໂງ່ຈ້າ ເບົາປັນຍາ
ບໍ່ມີຄວາມຄິດ ຖືກໂມຫະຄອບງຳ
ຊົນເຊັ່ນນັ້ນຍ່ອມຍິນດີໃນບ້ວງທີ່ມານວາງດັກໄວ້ນັ້ນ

[๘๘๒] ຊົນເຫຼົ່າໃດຄາຍຣາຄະ ໂທສະ ແລະອະວິດຊາໄດ້ແລ້ວ
ຊົນເຊັ່ນນັ້ນເປັນຜູ້ໝັ້ນຄົງ ຕັດດ້າຍຄືຕັນຫາທີ່ນຳໄປສູ່ພົບໄດ້ຂາດ
ບໍ່ມີເຄື່ອງມັດ ຈຶ່ງບໍ່ຍິນດີໃນບ້ວງແຫ່ງມານນັ້ນ

# ๕. ຊຳພຸກະເຖຣະຄາຖາ

## ພາສິດຂອງພຣະຊຳພຸກະເຖຣະ

(ພຣະຊຳພຸກະເຖຣະໄດ້ກ່າວ ๔ ຄາຖາໄວ້ດັ່ງນີ້ວ່າ)

[໔໗໓] ຕະຫຼອດເວລາ ໕໕ ປີ ເຮົາມີກາຍໝັກໝົມດ້ວຍຝຸ່ນ
ບໍຣິໂພກອາຫານເດືອນລະຄັ້ງ ລົກຜົມແລະໜວດອອກແລ້ວ

[໔໗໔] ຢືນດ້ວຍຕີນຂ້າງດຽວ ເວັ້ນການນັ່ງ
ກິນຄູດແຫ້ງແລະບໍ່ຍິນດີອາຫານທີ່ເຂົາເຊື້ອເຊີນ

[໔໗໕] ເຮົາໄດ້ເຮັດບາບກຳອັນເປັນເຫດໃຫ້ໄປສູ່ທຸກຄະຕິຫຼວງຫຼາຍເຊັ່ນນັ້ນ
ຖືກໂອຄະຕ່າງ ໆ ພັດພາໄປ
ຈຶ່ງໄດ້ເຖິງພຣະພຸດທະເຈົ້າວ່າເປັນບ່ອນເພິ່ງ

[໔໗໖] ທ່ານຈົ່ງແນມເຫັນການເຖິງສະຣະນະ
ຈົ່ງແນມເຫັນທຳວ່າເປັນທຳດີງາມ
ເຮົາບັນລຸວິດຊາ ໓ ໄດ້ເຮັດຕາມຄຳສັ່ງສອນຂອງພຣະພຸດທະເຈົ້າແລ້ວ

## ໖. ເສນະກະເຖຣະຄາຖາ

## ພາສິດຂອງພຣະເສນະກະເຖຣະ

(ພຣະເສນະກະເຖຣະໄດ້ກ່າວ ໔ ຄາຖາດ້ວຍການເປ່ງອຸທານວ່າ)

[໔໗໗] ເປັນການດີນໍທີ່ເຮົາມາໃກ້ທ່ານ້ຳຄະຍາໃນມື້ເພັງເດືອນ ໔
ຍ້ອນໄດ້ເຫັນພຣະສຳມາສຳພຸດທະເຈົ້າຊົງສະແດງທຳອັນປະເສີດ

[໔໗໘] ເຊິ່ງພຣະອົງມີພຣະຣັດສະໝີຫຼາຍແນວ
ເປັນພຣະຄະນາຈານ ຜູ້ເຖິງຄວາມເປັນຜູ້ເລີດ
ຊົງເປັນຜູ້ນຳທີ່ປະເສີດຂອງຊາວໂລກພ້ອມທັງເທວະໂລກ
ຊົງເປັນຜູ້ຊະນະມານ ມີພຣະຍານຫາປະມານບໍ່ໄດ້

[໔໗໙] ມີອານຸພາບຫຼາຍ ມີຄວາມພຽນຫຼາຍ ມີຄວາມຮຸ່ງເຮືອງຫຼາຍ
ບໍ່ມີອາສະວະ ສິ້ນອາສະວະທັງມວນ
ເປັນພຣະສາດສະດາ ບໍ່ມີໄພແຕ່ບ່ອນໃດ ໆ

[໔໘໐] ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ
ໄດ້ຊົງປົດເປື້ອງເຮົາມີນາມວ່າເສນະກະ
ຜູ້ເສົ້າໝອງມາດົນ ຖືກມິດສາທິດຖິຫຸ້ມຫໍ່ໄວ້
ຈາກກິເລດເຄື່ອງຮ້ອຍຮັດທັງໝົດ

# ຖ. ສຳພູຕະເຖຣະຄາຖາ

## ພາສິດຂອງພຣະສຳພູຕະເຖຣະ

ຮູ້ວ່າ ທ່ານພຣະສຳພູຕະເຖຣະໄດ້ກ່າວຄາຖາ ໔ ຄາຖາໄວ້ດັ່ງນີ້ວ່າ

[໔໑໑] ຜູ້ໃດຟ້າວໃນເວລາທີ່ຄວນຊ້າ
ແລະຊ້າໃນເວລາທີ່ຄວນຟ້າວ
ຜູ້ນັ້ນເປັນຄົນຈ້ຳ ຍ່ອມປະສົບທຸກ
ຍ້ອນບໍ່ຈັດແຈງໂດຍແຍບຄາຍ

[໔໑໔] ປະໂຫຍດຂອງເຂົາຍ່ອມເສື່ອມໄປ
ຄືດວງຈັນຂ້າງແຮມ
ເຂົາຍ່ອມໄດ້ຮັບຄວາມຕຳໜິຈາກວິນຍູຊົນ
ແລະພາດຈາກມິດທັງຫຼາຍ

[໔໑໓] ຜູ້ໃດຊ້າໃນເວລາທີ່ຄວນຊ້າ
ແລະຟ້າວໃນເວລາທີ່ຄວນຟ້າວ
ຜູ້ນັ້ນເປັນບັນດິດຍ່ອມປະສົບສຸກ
ຍ້ອນຈັດແຈງໂດຍອຸບາຍທີ່ແຍບຄາຍ

[໔໑໔] ປະໂຫຍດຂອງເຂົາ ຍ່ອມບໍລິບູນ
ຄືດວງຈັນຂ້າງຂຶ້ນ
ເຂົາຍ່ອມໄດ້ຮັບການຍົກຍ້ອງສັນເສີນ
ແລະບໍ່ພາດຈາກມິດທັງຫຼາຍ

# ຕຼ. ຣາຫຸລະເຖຣະຄາຖາ

## ພາສິດຂອງພຣະຣາຫຸນເຖຣະ

(ພຣະຣາຫຸນເຖຣະໄດ້ກ່າວ ໔ ຄາຖາໄວ້ດັ່ງນີ້ວ່າ)

[໔໑໕] ຊົນທັງຫຼາຍຮູ້ຈັກເຮົາວ່າ ພຣະຣາຫຸນຜູ້ຈະເລີນ
ພຽບພ້ອມດ້ວຍຄຸນສົມບັດ ໔ ປະການນັ້ນເອງ
ຄືຍ້ອນເຫດທີ່ເຮົາເປັນໂອຣົດຂອງພຣະພຸດທະເຈົ້າ

ແລະໄດ້ດວງຕາເຫັນທໍາ

[໔໙໖] ອັນໜຶ່ງ ຍ້ອນອາສະວະຂອງເຮົາໝົດສິ້ນແລ້ວ
ແລະຍ້ອນບໍ່ມີການເກີດອີກ
ເຮົາຈຶ່ງເປັນພຣະອະຣະຫັນ ຜູ້ຄວນແກ່ທັກຂິນາ
ບັນລຸວິດຊາ ໓ ເຫັນອະມະຕະທໍາ

[໔໙໗] ສັດທັງຫຼາຍມືດມົນຍ້ອນກາມ
ຖືກຕາໜ່າງຮ້ອຍຮັດໄວ້ແໜ້ນ ຖືກເຄື່ອງມຸງບັງຄືຕັນຫາປົກຄຸມໄວ້
ຖືກເຄື່ອງມັດຄືຄວາມຜະໝາດຜູກພັນໄວ້ ຄືປາໃນຂ້ອງ

[໔໙໘] ເຮົາກໍາຈັດກາມນັ້ນໄດ້ ຕັດບ້ວງມານໄດ້
ຖອນຕັນຫາພ້ອມທັງຮາກເຫງົ້າ
ຈຶ່ງເປັນຜູ້ເຢັນດັບເຢັນ

## ໙. ຈັນທະນະເຖຣະຄາຖາ

### ພາສິດຂອງພຣະຈັນທະນະເຖຣະ

(ພຣະຈັນທະນະເຖຣະໄດ້ພະຍາກອນພຣະອະຣະຫັດດ້ວຍຄາຖາໄວ້ດັ່ງນີ້ວ່າ)

[໔໙໙] ພັນລະຍາແຕ່ງໂຕດ້ວຍເຄື່ອງປະດັບລ້ວນແຕ່ເປັນຄໍາ
ມີໝູ່ສາວໃຊ້ຫ້ອມລ້ອມ ໄດ້ອຸ້ມລູກມາຫາເຮົາ

[໕໐໐] ແຕ່ (ເຮົາ )ພໍເຫັນນາງຜູ້ເປັນມານດາແຫ່ງບຸດຂອງເຮົາ
ໄດ້ຕົກແຕ່ງຮ່າງກາຍນຸ່ງຜ້າສວຍງາມ ກໍາລັງມາ
ຄືບ້ວງມັດຈຸຣາດທີ່ວາງດັກໄວ້

[໕໐໑] ຈາກນັ້ນ ໂຍນິໂສມະນະສິການຈຶ່ງເກີດຂຶ້ນແກ່ເຮົາ
ໂທດກໍຜາກົດ ຄວາມເບື່ອໜ່າຍກໍເກີດຂຶ້ນພ້ອມກັນ

[໕໐໔] ຕໍ່ແຕ່ນັ້ນ ຈິດຂອງເຮົາກໍລຸດພົ້ນ
ທ່ານຈົ່ງແນມເຫັນທໍາວ່າເປັນທໍາດີງາມ
ເຮົາບັນລຸວິດຊາ ໓ ໄດ້ເຮັດຕາມຄໍາສັ່ງສອນຂອງພຣະພຸດທະເຈົ້າແລ້ວ

# ໑໐. ທຳມິກະເຖຣະຄາຖາ

## ພາສິດຂອງພຣະທຳມິກະເຖຣະ

(ພຣະສາດສະດາ ໄດ້ຕັດ ໓ ພຣະຄາຖາໄວ້ດັ່ງນີ້ວ່າ)

[໓໐໓] ທຳທີ່ນັ້ນຍ່ອມຮັກສາຜູ້ປະພຶດທຳ
ທຳທີ່ປະພຶດດີແລ້ວຍ່ອມນຳສຸກມາໃຫ້
ນີ້ເປັນອານິສົງໃນທຳທີ່ປະພຶດດີແລ້ວ
ຜູ້ປະພຶດທຳຍ່ອມບໍ່ໄປສູ່ທຸກຄະຕິ

[໓໐໔] ຍ້ອນທຳແລະອະທຳທັງສອງມີຜົນບໍ່ຄືກັນ
ອະທຳນຳໄປສູ່ນະຮົກ
ທຳໃຫ້ເຖິງສຸກຄະຕິ

[໓໐໕] ຍ້ອນເຫດນັ້ນ ບຸກຄົນເມື່ອຊົມຊື່ນຍິນດີດ້ວຍໂອວາດ
ອັນພຣະຕະຖາຄົດເຈົ້າຜູ້ພົ້ນຄົງຕັດໄວ້ດີແລ້ວແນວນີ້
ເພິ່ງທຳຄວາມພໍໃຈໃນທຳທັງຫຼາຍ
ສາວົກທັງຫຼາຍຂອງພຣະຕະຖາຄົດເຈົ້າຜູ້ປະເສີດ
ຕັ້ງຢູ່ໃນທຳແລ້ວ ເປັນນັກປາດ
ເຖິງທຳວ່າເປັນບ່ອນເພິ່ງອັນປະເສີດສຸດ
ຍ່ອມພົ້ນໄປໄດ້

(ພຣະທຳມິກະເຖຣະໄດ້ພະຍາກອນພຣະອະຣະຫັດດ້ວຍຄາຖາສຸດທ້າຍວ່າ)

[໓໐໖] ເຮົາກຳຈັດອະວິດຊາເຊິ່ງເປັນຮາກເຫງົ້າຄືຫົວຝີ
ຖອນຕາໜ່າງຄືຕັນຫາໄດ້ແລ້ວ
ເຮົານັ້ນສິ້ນສັງສາຣະວັດແລ້ວ
ແລະບໍ່ມີກິເລດເປັນເຫດຂັດຂ້ອງ
ຄືດວງຈັນໃນມື້ເພັງປາສະຈາກກ້ອນເຝືອໝອກ

# ໑໑. ສັບປະກະເຖຣະຄາຖາ

## ພາສິດຂອງພຣະສັບປະກະເຖຣະ

(ພຣະສັບປະກະເຖຣະໄດ້ກ່າວ ໔ ຄາຖາໄວ້ດັ່ງນີ້ວ່າ)

[៣໐៧] ເມື່ອໃດ ນາງນົກຍາງມີຂົນຂາວສະອາດ
ຖືກຄວາມຢ້ານຕໍ່ກ້ອນເຝື້ອດຳ(ຝົນຟ້າຄະນອງ)ຄຸກຄາມ
ປາຖະໜາຈະກັບຮັງ ຈະບິນເຂົ້າສູ່ຮັງ
ເມື່ອນັ້ນ ແມ່ນ້ຳອະຊະກະຣະນີ ຍ່ອມເຮັດເຮົາໃຫ້ອອນຊອນ

[៣໐៨] ເມື່ອໃດ ນາງນົກຍາງມີຂົນຂາວສະອາດ
ຖືກຄວາມຢ້ານຕໍ່ກ້ອນເຝື້ອດຳຄຸກຄາມ
ບໍ່ເຫັນບ່ອນລີ້ບ່ອນຫຼົບໄພ ຍ່ອມເສາະຫາບ່ອນລີ້ບ່ອນຫຼົບໄພ
ເມື່ອນັ້ນ ແມ່ນ້ຳອະຊະກະຣະນີ ຍ່ອມເຮັດເຮົາໃຫ້ອອນຊອນ

[៣໐៩] ຕົ້ນຫວ້າທັງຫຼາຍ ໃນບ່ອນນັ້ນ ໆ ທັງສອງຟາກຝັ່ງ
ເຮັດຝັ່ງແມ່ນ້ຳທາງຫຼັງຖ້ຳໃຫຍ່ໃຫ້ງົດງາມ
ຈະເຮັດສັດອັນໃດ ບໍ່ໃຫ້ຍິນດີໄດ້ໃນບ່ອນນັ້ນນໍ

[៣໑໐] ກົບທັງຫຼາຍມີຜູ້ສຽງເບົາ
ຫຼົບໜີຝູງງູພິດໄດ້ຢ່າງປອດໄພ
ພາກັນສົ່ງສຽງຮ້ອງອັນມ່ວນ
ມື້ນີ້ເປັນສະໄໝທີ່ຢູ່ປາສະຈາກພູແລະແມ່ນ້ຳກໍບໍ່ມີ
ແມ່ນ້ຳອະຊະກະຣະນີເປັນແມ່ນ້ຳທີ່ປອດໄພ ສວຍງາມ ໜ້າອອນຊອນດີ

# ໑໘. ມຸທິຕະເຖຣະຄາຖາ

## ພາສິດຂອງພຣະມຸທິຕະເຖຣະ

(ພຣະມຸທິຕະເຖຣະໄດ້ກ່າວ ໔ ຄາຖາໄວ້ດັ່ງນີ້ວ່າ)

[៣໑໑] ເຮົາຕ້ອງການຈະລ້ຽງຊີບ ຈຶ່ງໄດ້ບັນພະຊາອຸປະສົມບົດແລ້ວ
ຈາກນັ້ນຈຶ່ງໄດ້ມີສັດທາ ມີຄວາມພຽນບາກບັ່ນໝັ້ນຄົງ ໂດຍຕັ້ງໃຈວ່າ

[໓໑໔] ຮ່າງກາຍຂອງເຮົານີ້ຈຶ່ງແຕກທຳລາຍໄປເທີ້ນ
ເນື້ອໜັງຂອງເຮົາຈຶ່ງເຫືອດແຫ້ງໄປ
ແຄ່ງຂາທັງ ໔ ຈະລຸດຈາກບ່ອນຕໍ່ເຂົ່າທັງ ໔ ພາດຕົກໄປກໍຕາມທີ

[໓໑໕] ເມື່ອເຮົາຍັງຖອນລູກສອນຄືຕັນຫາອອກບໍ່ໄດ້
ເຮົາຈັກບໍ່ກິນ ບໍ່ດື່ມ ບໍ່ອອກໄປຈາກວິຫານ
ທັງຈັກບໍ່ເອນກາຍນອນ

[໓໑໘] ເຊີນທ່ານເບິ່ງ ຄວາມພຽນແລະຄວາມບາກບັ່ນຂອງເຮົານັ້ນ
ຜູ້ຢູ່ແນວນີ້ ເຮົາບັນລຸວິດຊາ ໓
ໄດ້ເຮັດຕາມຄຳສັ່ງສອນຂອງພຣະພຸດທະເຈົ້າແລ້ວ

**ຈະຕຸກກະນິບາດ ຈົບ**

## ລວມເລື້ອງພຣະເຖຣະທີ່ມີໃນນິບາດນີ້ ຄື

໑. ພຣະນາຄະສະມາລະເຖຣະ
໒. ພຣະພະຄຸເຖຣະ
໓. ພຣະສະພິຍະເຖຣະ
໔. ພຣະນັນທະກະເຖຣະ
໕. ພຣະຊຳພຸກະເຖຣະ
໖. ພຣະເສນະກະເຖຣະ
໗. ພຣະສຳພູຕະເຖຣະ
໘. ພຣະຣາຫຸນເຖຣະ
໙. ພຣະຈັນທະນະເຖຣະ
໑໐. ພຣະທຳມິກະເຖຣະ
໑໑. ພຣະສັບປະກະເຖຣະ
໑໒. ພຣະມຸທິຕະເຖຣະ

ມີ ໕໒ (໔໗) ຄາຖາ

ແລະພຣະເຖຣະທັງໝົດກໍມີ ໑໓ ອົງ (໑໒ ອົງ) ດັ່ງນີ້ແລ

# ໕. ປັນຈະກະນິບາດ

## ໑. ຣາຊະທັດຕະເຖຣະຄາຖາ

### ພາສິດຂອງພຣະຣາຊະທັດຕະເຖຣະ

(ພຣະຣາຊະທັດຕະເຖຣະໄດ້ກ່າວ ໕ ຄາຖາໄວ້ດັ່ງນີ້ວ່າ)

[໓໑໕] ພິກຂຸໄປປ່າຊ້າຜີດິບ₁ແລ້ວ
ໄດ້ເຫັນຊາກສົບແມ່ຍິງທີ່ຖືກປະຖິ້ມໄວ້ໃນປ່າຊ້າ
ທັງຖືກໝູ່ໜອນບ້ອນກັດກິນຢູ່

[໓໑໖] ທຳມະດາຄົນຜູ້ຮັກສວຍຮັກງາມລາງພວກ
ພົບເຫັນຊາກສົບອັນຊົ່ວແລ້ວພາກັນກຽດຊັງ
(ແຕ່)ການຣາຄະຜາກົດແກ່ເຮົາ
ເຮົານັ້ນເປັນຄືຄົນຕາບອດ
ຍ້ອນບໍ່ເຫັນຂອງບໍ່ສະອາດ
ທີ່ໄຫຼອອກຈາກທະວານທັງ ໙ ໃນຊາກສົບນັ້ນ

[໓໑໗] ຊົ່ວໄລຍະເວລາທີ່ເຂົ້າສຸກ
ເຮົາຫຼີກອອກຈາກສະຖານບ່ອນນັ້ນ
ມີສະຕິສຳປະຊັນຍະ
ໄດ້ເຂົ້າໄປສູ່ສະຖານທີ່ສົມຄວນແຫ່ງໜຶ່ງ

[໓໑໘] ຈາກນັ້ນ ໂຍນິໂສມະນະສິການຈຶ່ງເກີດຂຶ້ນແກ່ເຮົາ
ໂທດກໍຜາກົດ ຄວາມເບື່ອໜ່າຍກໍເກີດຂຶ້ນພ້ອມກັນ

[໓໑໙] ຕໍ່ແຕ່ນັ້ນ ຈິດຂອງເຮົາກໍລຸດພົ້ນ
ທ່ານຈົ່ງແນມເຫັນທຳວ່າເປັນທຳດີງາມ
ເຮົາບັນລຸວິດຊາ ໓ ໄດ້ເຮັດຕາມຄຳສັ່ງສອນຂອງພຣະພຸດທະເຈົ້າແລ້ວ

## ໒. ສຸພູຕະເຖຣະຄາຖາ

### ພາສິດຂອງພຣະສຸພູຕະເຖຣະ

(ພຣະສຸພູຕະເຖຣະໄດ້ກ່າວ ໕ ຄາຖາໄວ້ດັ່ງນີ້ວ່າ)

[໓໔໐] ຄົນຜູ້ປະສົງຈະເຮັດວຽກງານ
ປະກອບຕົນຢູ່ໃນວຽກງານທີ່ບໍ່ຄວນປະກອບ
ຫາກຍັງຂືນເຮັດຢູ່
ຈະບໍ່ປະສົບຄວາມສໍາເລັດ
ການປະກອບໃນວຽກງານທີ່ບໍ່ຄວນປະກອບນັ້ນແລ
ເປັນລັກສະນະແຫ່ງຄວາມລົ້ມເຫຼວ

[໓໔໑] ບຸກຄົນໃດຍັງເພິກຖອນຄວາມເປັນຢູ່ຢ່າງລໍາບາກບໍ່ໄດ້
ຫາກລະຖິ້ມຄວາມບໍ່ຜະໝາດເຊິ່ງເປັນທໍາອັນເອກສາ
ບຸກຄົນນັ້ນເປັນຄືຄົນກາລະກິນີ
ຫາກລະຖິ້ມທໍາອື່ນ ໆ ສາແມ່ນທັງໝົດ
ກໍຈະເພິ່ງເປັນຄືຄົນຕາບອດ
ຍ້ອນແນມບໍ່ເຫັນທັງທໍາທີ່ສະງົບແລະທໍາທີ່ບໍ່ສະງົບ

[໓໔໒] ບຸກຄົນຄວນເວົ້າເຖິງສິ່ງທີ່ຕົນເຮັດໄດ້
ບໍ່ເພິ່ງເວົ້າເຖິງສິ່ງທີ່ຕົນເຮັດບໍ່ໄດ້
ບັນດິດທັງຫຼາຍຍ່ອມຮູ້ຈັກບຸກຄົນຜູ້ບໍ່ເຮັດ ດີແຕ່ເວົ້າ

[໓໔໓] ດອກໄມ້ງາມ ມີສີສວຍ(ແຕ່)ບໍ່ມີກິ່ນ ແມ່ນສັນໃດ
ວາຈາສຸພາສິດກໍສັນນັ້ນ
ຍ່ອມບໍ່ມີຜົນແກ່ຜູ້ບໍ່ເຮັດຕາມ

[໓໔໔] ດອກໄມ້ງາມ ມີທັງສີແລະມີກິ່ນ ແມ່ນສັນໃດ
ວາຈາສຸພາສິດ ກໍສັນນັ້ນ
ຍ່ອມມີຜົນແກ່ຜູ້ເຮັດຕາມດ້ວຍດີ

## ໓. ຄິຣິມານັນທະເຖຣະຄາຖາ

### ພາສິດຂອງພຣະຄິຣິມານັນທະເຖຣະ

(ພຣະຄິຣິມານັນທະເຖຣະໄດ້ກ່າວ ໕ ຄາຖາໄວ້ດັ່ງນີ້ວ່າ)

[໓໔໕] ຝົນຕົກລົງມາສຽງດັງກະທົ່ມຄ້າຍສຽງເພງອັນມ່ວນ
ກຸດຕິຂອງເຮົາສະບາຍ ມຸງບັງມິດຊິດດີ

ເຮົາເຂົ້າໄປສະງົບຢູ່ໃນກຸດຕິນັ້ນ
ຖ້າຕ້ອງການຈະຕົກ ກໍຈົ່ງຕົກລົງມາເທີ້ນຝົນ

[໓໔໖] ຝົນຕົກລົງມາສຽງດັງກະທົ່ມຄ້າຍສຽງເພງອັນມ່ວນ
ກຸດຕິຂອງເຮົາສະບາຍ ມຸງບັງມິດຊິດດີ
ເຮົາມີຈິດສະງົບຢູ່ໃນກຸດຕິນັ້ນ
ຖ້າຕ້ອງການຈະຕົກ ກໍຈົ່ງຕົກລົງມາເທີ້ນຝົນ

[໓໔໗] ຝົນຕົກລົງມາສຽງດັງກະທົ່ມຄ້າຍສຽງເພງອັນມ່ວນ
ກຸດຕິຂອງເຮົາສະບາຍ ມຸງບັງມິດຊິດດີ
ເຮົາບໍ່ມີຣາຄະຢູ່ໃນກຸດຕິນັ້ນ
ຖ້າຕ້ອງການຈະຕົກ ກໍຈົ່ງຕົກລົງມາເທີ້ນຝົນ

[໓໔໘] ຝົນຕົກລົງມາສຽງດັງກະທົ່ມຄ້າຍສຽງເພງອັນມ່ວນ
ກຸດຕິຂອງເຮົາສະບາຍ ມຸງບັງມິດຊິດດີ
ເຮົາບໍ່ມີໂທສະຢູ່ໃນກຸດຕິນັ້ນ
ຖ້າຕ້ອງການຈະຕົກ ກໍຈົ່ງຕົກລົງມາເທີ້ນຝົນ

[໓໔໙] ຝົນຕົກລົງມາສຽງດັງກະທົ່ມຄ້າຍສຽງເພງຂັບອັນມ່ວນ
ກຸດຕິຂອງເຮົາສະບາຍ ມຸງບັງມິດຊິດດີ
ເຮົາບໍ່ມີໂມຫະຢູ່ໃນກຸດຕິນັ້ນ
ຖ້າຕ້ອງການຈະຕົກ ກໍຈົ່ງຕົກລົງມາເທີ້ນຝົນ

## ໔. ສຸມະນະເຖຣະຄາຖາ

### ພາສິດຂອງພຣະສຸມະນະເຖຣະ

(ພຣະສຸມະນະເຖຣະເມື່ອເປ່ງອຸທານຈຶ່ງໄດ້ກ່າວ ໕ ຄາຖາໄວ້ດັ່ງນີ້ວ່າ)

[໓໕໐] ພຣະອຸປັດຊາປາຖະໜາທຳຂໍ້ໃດ ໃນບັນດາທຳທັງຫຼາຍ
ຈຶ່ງໄດ້ອະນຸເຄາະເຮົາຜູ້ມຸ້ງຫວັງແຕ່ນິບພານ
ກິດທີ່ຄວນເຮັດ ເຮົາໄດ້ເຮັດສຳເລັດໝົດແລ້ວ

[໓໕໑] ທຳໆເຮົາໄດ້ບັນລຸແລ້ວ
ເຮັດໃຫ້ແຈ້ງປະຈັກດ້ວຍຕົນເອງແລ້ວ

ເຮົານັ້ນມີຍານບໍລິສຸດ ໝົດຄວາມສົງໄສ
ຈຶ່ງປະກາດໃຫ້ແຈ້ງໃນສໍານັກທ່ານ

[໓໓໔] ເຮົາຮູ້ຈັກຂັນທີ່ອາໄສຢູ່ມາກ່ອນ໌
ຊໍາຣະທິບພະຈັກຂຸໃຫ້ມົດຈົດແລ້ວ
ເຮົາໄດ້ບັນລຸປະໂຫຍດຕົນ ໄດ້ເຮັດຕາມຄໍາສັ່ງສອນຂອງພຣະພຸດທະເຈົ້າແລ້ວ

[໓໓໓] ເຮົາບໍ່ຜະໝາດ
ສຶກສາສິກຂາມາຢ່າງດີໃນຄໍາສອນຂອງທ່ານ
ກິເລດອາສະວະທັງມວນຂອງເຮົາສິ້ນໄປແລ້ວ
ບັດນີ້ ບໍ່ມີການເກີດອີກ

[໓໓໔] ທ່ານມີແຕ່ຄວາມອີດູ
ໄດ້ອະນຸເຄາະສັ່ງສອນເຮົາ ດ້ວຍຂໍ້ວັດປະຕິບັດທີ່ປະເສີດ
ຄໍາສອນຂອງທ່ານບໍ່ຂາດຄ່າ
ເຮົາເປັນອັນເຕວາສິກສຶກສາແລ້ວໃນສໍານັກຂອງທ່ານ

## ໕. ວັດຖະເຖຣະຄາຖາ

### ພາສິດຂອງພຣະວັດຖະເຖຣະ

(ພຣະວັດຖະເຖຣະໄດ້ກ່າວ ໕ ຄາຖາເຄິ່ງໄວ້ດັ່ງນີ້ວ່າ)

[໓໓໕] ຮູ້ວ່າ ແມ່ອອກແມ່ຂອງເຮົາດີແທ້
ໄດ້ຊີ້ໃຫ້ເຮົາເຫັນຄັນແຫຼມອັນເປັນຄໍາສັ່ງສອນ
ເຊິ່ງເຮົາໄດ້ຖືກທ່ານຜູ້ໃຫ້ກໍາເນີດ ພໍ່າສອນ ຟັງຄໍາມາແລ້ວ
ກໍໄດ້ຜາຣົບຄວາມພຽນ ມີໃຈເດັດດ່ຽວ
ໄດ້ບັນລຸສໍາໂພທິຍານອັນປະເສີດ

[໓໓໖] ເຮົາເປັນພຣະອະຣະຫັນ ຜູ້ຄວນແກ່ທັກຂິນາ
ບັນລຸວິດຊາ ໓ ເຫັນອະມະຕະທໍາ
ຊະນະເສນາມານໄດ້ແລ້ວ ຢູ່ຢ່າງບໍ່ມີອາສະວະ

[໓໓໗] ອາສະວະທີ່ມີແກ່ເຮົາທັງພາຍໃນແລະພາຍນອກ
ເຮົາຖອນໄດ້ໝົດສິ້ນແລ້ວ ແລະຈະເກີດຂຶ້ນບໍ່ໄດ້ອີກ

[໓໓໗] ແມ່ອອກແມ່ເປັນຍິງຜູ້ມີຄວາມແກ່ກ້າ
ໄດ້ກ່າວເນື້ອຄວາມນີ້ແກ່ເຮົາ
ແມ່ນເມື່ອເຮົາເປັນບຸດຂອງທ່ານຜູ້ບໍ່ມີກິເລດ
ກິເລດອັນປຽບຄືໝູ່ໄມ້ໃນປ່າກໍ່ຍ່ອມບໍ່ມີແກ່ທ່ານແມ່

[໓໓໙] ທຸກເຮົາເຮັດໃຫ້ສິ້ນສຸດແລ້ວ
ອັດຕະພາບນີ້ມີເປັນຄັ້ງສຸດທ້າຍ
ສັງສາຣະວັດຄືຄວາມເກີດແລະຄວາມຕາຍໝົດສິ້ນແລ້ວ
ບັດນີ້ ບໍ່ມີການເກີດອີກ

## ໓. ນະທີກັດສະປະເຖຣະຄາຖາ

### ພາສິດຂອງພຣະນະທີກັດສະປະເຖຣະ

(ພຣະນະທີກັດສະປະເຖຣະໄດ້ກ່າວ ໕ ຄາຖາໄວ້ດັ່ງນີ້ວ່າ)

[໓໔໐] ພຣະພຸດທະເຈົ້າໄດ້ສະເດັດມາສູ່ແມ່ນ້ຳເນຣັນຊະຣາ
ເພື່ອເປັນປະໂຫຍດແກ່ເຮົາຜູ້ໄດ້ຟັງທຳແລ້ວລະມິດສາທິດຖິໄດ້

[໓໔໑] ຄັ້ງເມື່ອເຮົາເປັນປຸຖຸຊົນຍັງມືດມົນຢູ່
ສຳຄັນເອົາວ່າ ການບູຊາຍັນນີ້ເປັນຄວາມບໍລິສຸດ
ຈຶ່ງໄດ້ບູຊາຍັນຕ່າງ ໆ ຊະນິດ ແລະໄດ້ບູຊາໄຟດ້ວຍ

[໓໔໒] ເຮົານັ້ນຍຶດຖືທິດຖິ
ລຸ້ມຫຼົງໄປດ້ວຍການເຊື່ອຖືຜິດ
ເປັນຄົນຕາບອດ ຍັງບໍ່ຮູ້ແຈ້ງ
ໄດ້ສຳຄັນເຖິງຄວາມບໍ່ບໍລິສຸດ ວ່າເປັນຄວາມບໍລິສຸດ

[໓໔໓] ມິດສາທິດຖິເຮົາລະໄດ້ແລ້ວ
ພົບທັງປວງເຮົາທຳລາຍໄດ້ແລ້ວ
ບັດນີ້ ເຮົາບູຊາໄຟຄືພຣະສຳມາສຳພຸດທະເຈົ້າຜູ້ຄວນແກ່ທັກຂິນາ
ເຮົາຈະນອບນ້ອມພຣະຕະຖາຄົດເຈົ້າ

[໓໔໔] ຄວາມລຸ້ມຫຼົງທັງປວງເຮົາລະໄດ້ແລ້ວ
ພະວະຕັນຫາເຮົາກໍ່ທຳລາຍໄດ້ແລ້ວ

ການວຽນວ່າຍຕາຍເກີດສິ້ນໄປແລ້ວ
ບັດນີ້ ບໍ່ມີການເກີດອີກ

## ໗. ຄະຍາກັດສະປະເຖຣະຄາຖາ

### ພາສິດຂອງພຣະຄະຍາກັດສະປະເຖຣະ

(ພຣະຄະຍາກັດສະປະເຖຣະໄດ້ກ່າວ ໕ ຄາຖາໄວ້ດັ່ງນີ້ວ່າ)

[໓໔໕] ເຮົານັ້ນໄດ້ລົງນໍ້າ(ລອຍບາບ)ໃນແມ່ນໍ້າຄະຍາ
ໃນມື້ເພັງເດືອນ ໔ ມື້ໜຶ່ງ ໓ ເວລາ
ຄື ເວລາເຊົ້າ ເວລາທ່ຽງ ເວລາຄໍ່າ
ໂດຍເຂົ້າໃຈເອົາວ່າ

[໓໔໖] ເຮົາໄດ້ສະເຫວີຍບາບກໍາທີ່ເຮົາເຮັດໄວ້ໃນຊາດອື່ນ ໆ ແຕ່ປາງກ່ອນ
ບັດນີ້ ເຮົາຈະລອຍບາບນັ້ນສາຊື່ນີ້
ເຮົາໄດ້ມີຄວາມເຫັນແນວນີ້ມາແຕ່ເດີມ

[໓໔໗] ເຮົານັ້ນເມື່ອຟັງພຣະວາຈາສຸພາສິດ
ອັນເປັນບົດທີ່ປະກອບດ້ວຍເຫດຜົນແລ້ວ
ກໍໄດ້ພິຈາລະນາເຫັນເນື້ອຄວາມຕາມຄວາມເປັນຈິງ
ໄດ້ຢ່າງຖ່ອງແທ້ ໂດຍແຍບຄາຍ

[໓໔໘] ລ້າງບາບໄດ້ໝົດແລ້ວ ເປັນຜູ້ບໍ່ມີມົນທິນ
ມີດຈິດສະອາດ ບໍລິສຸດ
ເປັນທາຍາດຂອງພຣະພຸດທະເຈົ້າ
ເປັນບຸດພຸດທະໂອຣົດ

[໓໔໙] ເຮົາກ້າວລົງສູ່ກະແສນໍ້າຄືມັກອັນມີອົງ ໘
ລອຍບາບໄດ້ໝົດແລ້ວ ຈຶ່ງບັນລຸວິດຊາ ໓
ໄດ້ເຮັດຕາມຄໍາສັ່ງສອນຂອງພຣະພຸດທະເຈົ້າແລ້ວ

# ໗. ວັກກະລິເຖຣະຄາຖາ

## ພາສິດຂອງພຣະວັກກະລິເຖຣະ

(ພຣະຜູ້ມີພຣະພາກເຈົ້າໄດ້ຕັດຖາມວ່າ)

[໓໕໐] ທ່ານ ເມື່ອຢູ່ໃນປ່າໃຫຍ່ເປັນສະຖານທີ່ລຳບາກ
ຫາປັດໄຈໄດ້ຍາກ ຖືກໂຣກລົມລົບກວນ ຈັກເຮັດແນວໃດລະພິກຂຸ
ພຣະວັກກະລິເຖຣະ (ໄດ້ຂາບທູນວ່າ)

[໓໕໑] ຂ້າພຣະອົງຈັກແຜ່ປີຕິສຸກອັນເຕັມປ່ຽມໄປທົ່ວຮ່າງກາຍ
ຄອບງຳແມ່ນປັດໄຈທີ່ເສົ້າໝອງ ຢູ່ໃນປ່າໃຫຍ່

[໓໕໒] ຈະຈະເລີນສະຕິປັດຖານ ໔ ອິນຊີ ໕ ພະລະ ໕
ແລະໂພດຊົງ ໗ ຢູ່ໃນປ່າໃຫຍ່

[໓໕໓] ຂ້າພຣະອົງພໍໄດ້ເຫັນເພື່ອນພົມມະຈາຣີທັງຫຼາຍ
ຜູ້ພາຣົບຄວາມພຽນ ມີໃຈເດັດດ່ຽວ
ມີຄວາມບາກບັ່ນໝັ້ນຄົງຢູ່ສະເໝີ ມີຄວາມສາມັກຄີພ້ອມພຽງກັນ
ມີຄວາມເຫັນຮ່ວມກັນ ຈຶ່ງຈັກຢູ່ໃນປ່າໃຫຍ່

[໓໕໔] ເມື່ອຣະນຶກເຖິງພຣະພຸດທະເຈົ້າ ຜູ້ເຝິກພຣະອົງແລ້ວ
ມີພຣະຫະໄທຕັ້ງໝັ້ນ ຈັກເປັນຜູ້ບໍ່ຂີ້ຄ້ານ
ທັງກາງເວັນແລະກາງຄືນຢູ່ໃນປ່າໃຫຍ່

# ໘. ວິຊິຕະເສນະເຖຣະຄາຖາ

## ພາສິດຂອງພຣະວິຊິຕະເສນະເຖຣະ

(ພຣະວິຊິຕະເສນະເຖຣະໄດ້ກ່າວ ໕ ຄາຖາໄວ້ດັ່ງນີ້ວ່າ)

[໓໕໕] ເຮົາຈະຄ້ອງຈິດຂອງເຈົ້າໄວ້
ຄືຄວາມຊ້າງກັກຊ້າງໄວ້ທີ່ປະຕູເມືອງ
ເຮົາຈະບໍ່ນຳພາເຈົ້າເຊິ່ງເປັນຕາໜ່າງແຫ່ງກາມເກີດໃນຮ່າງກາຍ
ໃຫ້ເປັນໄປໃນກຳຊົ່ວ

[໓໕໖] ເຈົ້າຖືກເຮົາຄ້ອງໄວ້ຈະໄປບໍ່ໄດ້
ຄືຊ້າງບໍ່ໄດ້ປ່ອງປະຕູ ໝົດທາງໄປ
ແນ່ະຈິດຜູ້ຊົ່ວຊ້າ ກໍເຈົ້າຜູ້ດື້ດ້ານ
ຈະພໍໃຈໃນກຳຊົ່ວ ທ່ຽວໄປສະເໝີ ໆ ບໍ່ໄດ້

[໓໕໗] ຄວານຊ້າງຜູ້ມີກຳລັງເຂັ້ມແຂງ
ຍ່ອມບັງຄັບຊ້າງທີ່ຈັບໄດ້ໃໝ່ ຍັງບໍ່ໄດ້ເຝິກ
ທັງບໍ່ຕ້ອງການ(ຈະໃຫ້ເຝິກ)ດ້ວຍ ໃຫ້ຢູ່ໃນອຳນາດໄດ້ ສັນໃດ
ເຮົາຈະບັງຄັບເຈົ້າໃຫ້ຢູ່ໃນອຳນາດໄດ້ ສັນນັ້ນ

[໓໕໘] ສາຣະຖີມີໜຶ່ງ ເກ່ງໃນການເຝິກມ້າໃຫ້ດີ
ຍ່ອມເຝິກມ້າໃຫ້ຮອບຮູ້ໄດ້ ສັນໃດ
ເຮົາຕັ້ງຢູ່ໃນພະລະ ໕
ຈະເຝິກເຈົ້າໃຫ້ໄດ້ ສັນນັ້ນ

[໓໕໙] ຈັກໃຊ້ສະຕິມັດເຈົ້າໄວ້ ຈະຄອຍເອົາໃຈໃສ່ເຝິກເຈົ້າ
ເຈົ້າຈິດເອີຍ ເຈົ້າຖືກບັງຄັບໃຫ້ເຮັດທຸລະດ້ວຍຄວາມພຽນແລ້ວ
ຈະໄປໄກຈາກອາລົມພາຍໃນນີ້ບໍ່ໄດ້

## ໑໐. ຍະສະທັດຕະເຖຣະຄາຖາ

## ພາສິດຂອງພຣະຍະສະທັດຕະເຖຣະ

(ພຣະຍະສະທັດຕະເຖຣະໄດ້ກ່າວ ໕ ຄາຖາໄວ້ດັ່ງນີ້ວ່າ)

[໓໖໐] ຄົນປັນຍາຊາມ ຄິດແຕ່ຈະແຂ່ງດີ
ເຖິງຟັງຄຳສອນຂອງພຣະຊິນນະເຈົ້າ
ກໍຍັງໄກຈາກພຣະສັດທຳ ຄືຟ້າກັບດິນ

[໓໖໑] ຄົນປັນຍາຊາມ ຄິດແຕ່ຈະແຂ່ງດີ
ເຖິງຟັງຄຳສອນຂອງພຣະຊິນນະເຈົ້າ
ກໍຍັງເສື່ອມຈາກພຣະສັດທຳ ຄືດວງຈັນຂ້າງແຮມ

[໓໖໒] ຄົນປັນຍາຊາມ ຄິດແຕ່ຈະແຂ່ງດີ
ເຖິງຟັງຄຳສອນຂອງພຣະຊິນນະເຈົ້າ
ກໍຍັງຫ່ຽວແຫ້ງໃນພຣະສັດທຳ ຄືປາໃນນ້ຳໜ້ອຍ

[๓๒๓] ຄົນປັນຍາຊາມ ຄິດແຕ່ຈະແຂ່ງດີ
ເຖິງຟັງຄຳສອນຂອງພຣະຊິນນະເຈົ້າ
ກໍບໍ່ງອກງາມໃນພຣະສັດທຳ ຄືພືດເນົ່າໃນໄຮ່ນາ

[๓๒๔] ສ່ວນຜູ້ໃດມີຈິດອັນຄຸ້ມຄອງໄວ້ແລ້ວ ຍ່ອມຟັງຄຳສອນຂອງພຣະຊິນນະເຈົ້າ
ຜູ້ນັ້ນເຮັດອາສະວະທັງປວງໃຫ້ສິ້ນໄປ ເຮັດພຣະອະຣະຫັດໃຫ້ແຈ້ງແລ້ວ
ບັນລຸນິບພານອັນສະງົບຢ່າງຍິ່ງ ເປັນຜູ້ບໍ່ມີອາສະວະ ປະຣິນິບພານ

## ໑໑. ໂສນະກຸຕິກັນນະເຖຣະຄາຖາ

### ພາສິດຂອງພຣະໂສນະກຸຕິກັນນະເຖຣະ

(ພຣະໂສນະກຸຕິກັນນະເຖຣະໄດ້ກ່າວ ໕ ຄາຖາໄວ້ດັ່ງນີ້ວ່າ)

[๓๒๕] ເຮົາໄດ້ອຸປະສົມບົດແລ້ວ ເປັນຜູ້ລຸດພົ້ນ ບໍ່ມີອາສະວະ
ໄດ້ເຝົ້າພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ
ແລະໄດ້ຢູ່ຮ່ວມກັບພຣະອົງໃນພຣະວິຫານ

[๓๒๖] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ກາງແຈ້ງຫຼາຍຣາຕີນັ້ນແລ
ເວລານັ້ນພຣະສາດສະດາ ຜູ້ຊົງສະຫຼາດໃນທຳເປັນເຄື່ອງຢູ່
ໄດ້ສະເດັດເຂົ້າໄປສູ່ພຣະວິຫານ

[๓๒๗] ພຣະໂຄດົມໄດ້ຊົງປູຜ້າສັງຄາຕິ
ສຳເລັດສີຫະໄສຍາດ ລະຄວາມຫວາດກົວໄດ້ແລ້ວ
ຄືຣາດຊະສີນອນຢູ່ໃນຖ້ຳພູ

[๓๒๘] ຈາກນັ້ນ ໂສນະສາວົກຂອງພຣະສຳມາສຳພຸດທະເຈົ້າ
ຜູ້ກ່າວວາຈາມ່ວນ
ໄດ້ກ່າວພຣະສັດທຳຖວາຍ
ເບື້ອງພຣະພັກພຣະພຸດທະເຈົ້າຜູ້ປະເສີດ

[๓๒๙] ກຳນົດຮູ້ປັນຈະຂັນ
ເຮັດອະຣິຍະມັກມີອົງ ๘ ອັນເປັນທາງຊື່ໃຫ້ຈະເລີນ
ບັນລຸນິບພານອັນສະງົບຢ່າງຍິ່ງ
ຈັກເປັນຜູ້ບໍ່ມີອາສະວະ ປະຣິນິບພານ

# ໑໘. ໂກສິຍະເຖຣະຄາຖາ
## ພາສິດຂອງພຣະໂກສິຍະເຖຣະ

(ພຣະໂກສິຍະເຖຣະໄດ້ກ່າວ ໕ ຄາຖາໄວ້ດັ່ງນີ້ວ່າ)

[໓໗໐] ຜູ້ໃດເປັນປາດ ຮູ້ຄໍາສັ່ງສອນຂອງຄູທັງຫຼາຍ
ເພິ່ງຢູ່ໃນໂອວາດຂອງທ່ານ
ແລະເພິ່ງທໍາຄວາມເຄົາລົບໃຫ້ເກີດໃນໂອວາດຂອງທ່ານ
ຜູ້ນັ້ນຊື່ວ່າມີຄວາມພັກດີ ເປັນບັນດິດ
ແລະເພິ່ງເປັນຜູ້ວິເສດຍ້ອນຮູ້ທໍາທັງຫຼາຍ

[໓໗໑] ອັນຕະລາຍທີ່ຮ້າຍແຮງເກີດຂຶ້ນແລ້ວ
ເຮັດຜູ້ໃດເຊິ່ງພິຈາລະນາຢູ່ໃຫ້ຫວັ່ນໄຫວບໍ່ໄດ້
ຜູ້ນັ້ນຊື່ວ່າມີກໍາລັງ ເປັນບັນດິດ
ແລະເພິ່ງເປັນຜູ້ວິເສດຍ້ອນຮູ້ທໍາທັງຫຼາຍ

[໓໗໒] ຜູ້ໃດຕັ້ງໝັ້ນບໍ່ຫວັ່ນໄຫວ
ມີປັນຍາເລິກເຊິ່ງ ຄືມະຫາສະມຸດ
ເຫັນອັດຖະທີ່ລະອຽດ
ຜູ້ນັ້ນຊື່ວ່າເປັນຜູ້ບໍ່ງ່ອນແງ່ນ ເປັນບັນດິດ
ແລະເພິ່ງເປັນຜູ້ວິເສດ ຍ້ອນຮູ້ທໍາທັງຫຼາຍ

[໓໗໓] ຜູ້ໃດເປັນພະຫູສູດ ຊົງທໍາ
ແລະມັກປະພຶດທໍາສົມຄວນແກ່ທໍາ
ຜູ້ນັ້ນຊື່ວ່າເປັນບັນດິດເຊັ່ນກັບຄູນັ້ນ
ແລະເພິ່ງເປັນຜູ້ວິເສດຍ້ອນຮູ້ທໍາທັງຫຼາຍ

[໓໗໔] ຜູ້ໃດຍ່ອມຮູ້ຄວາມໝາຍຂອງພຣະປະຣິຍັດຕິທໍາ
ທີ່ພຣະສໍາມາສໍາພຸດທະເຈົ້າຕັດໄວ້ແລ້ວ
ແລະເມື່ອຮູ້ແລ້ວກໍເຮັດຕາມທີ່ຮູ້
ຜູ້ນັ້ນຊື່ວ່າເປັນຜູ້ຢູ່ໃນອໍານາດເຫດຜົນ ເປັນບັນດິດ
ແລະເພິ່ງເປັນຜູ້ວິເສດຍ້ອນຮູ້ທໍາທັງຫຼາຍ

**ປັນຈະກະນິບາດ ຈົບ**

## ລວມເລື້ອງພຣະເຖຣະທີ່ມີໃນນິບາດນີ້ ຄື

໑. ພຣະຣາຊະທັດຕະເຖຣະ
໒. ພຣະສຸພູຕະເຖຣະ
໓. ພຣະຄິຣິມານັນທະເຖຣະ
໔. ພຣະສຸມະນະເຖຣະ
໕. ພຣະວັດຖະເຖຣະ
໖. ພຣະນະທີກັດສະປະເຖຣະ
໗. ພຣະຄະຍາກັດສະປະເຖຣະ
໘. ພຣະວັກກະລິເຖຣະ
໙. ພຣະວິຊິຕະເຖຣະ
໑໐. ພຣະຍະສະທັດຕະເຖຣະ
໑໑. ພຣະໂສນະກຸຕິກັນນະເຖຣະ
໑໒. ພຣະໂກສິຍະເຖຣະ

ໃນນິບາດນີ້ ມີພຣະເຖຣະ ໑໒ ອົງ

ກ່າວອົງລະ ໕ ຄາຖາ ລວມເປັນ ໖໐ ຄາຖາ ດັ່ງນີ້ແລ

# ໖. ສັກກະນິບາດ

## ໑. ອຸຣຸເວລະກັດສະປະເຖຣະຄາຖາ

### ພາສິດຂອງພຣະອຸຣຸເວລະກັດສະປະເຖຣະ

(ພຣະອຸຣຸເວລະກັດສະປະເຖຣະໄດ້ກ່າວ ໖ ຄາຖາໄວ້ດັ່ງນີ້ວ່າ)

[໓໗໕] (ພຣະໂຄດົມຍັງບໍ່ກໍາຣາບເຮົາພຽງໃດ)
ເຮົາເຫັນປາຕິຫານຂອງພຣະໂຄດົມຜູ້ເຮືອງຍົດແລ້ວ
ກໍຍັງເປັນຄົນລວງໂລກດ້ວຍຄວາມຣິດສະຫຍາ ແລະມານະ
ຍັງບໍ່ນອບນ້ອມ ພຽງນັ້ນ

[໓໗໖] ພຣະສາດສະດາຜູ້ເປັນສາຣະຖີເຝິກຄົນ
ຊົງຮູ້ຄວາມດໍາຣິຂອງເຮົາແລ້ວ ກໍຊົງຫ້າມ
ແຕ່ນັ້ນ ເຮົາກໍໄດ້ມີຄວາມສັງເວດ
ຂົນຫົວລຸກຢ່າງບໍ່ເຄີຍເປັນ

[໓໗໗] ເວລານັ້ນ ເຮົາລະຄວາມສໍາເລັດຈັກໜ້ອຍຂອງເຮົາ
ຄັ້ງທີ່ເຄີຍເປັນຊະດິນ[1]
ແລ້ວບວດໃນພຣະສາດສະໜາຂອງພຣະຊິນນະເຈົ້າ

[๕๖๗] ຄັ້ງກ່ອນ ເຮົາຍິນດີດ້ວຍການບູຊາຍັນ ມຸ້ງການສຸກຄະຕິພູມ
ພາຍຫຼັງ ຖອນຣາຄະ ໂທສະ ແລະແມ່ນໂມຫະໄດ້ຂາດ

[๕๖๘] ເຮົາຮູ້ຂັນທີ່ອາໄສຢູ່ມາກ່ອນ
ໄດ້ຊຳຣະທິບພະຈັກຂຸໃຫ້ມົດຈົດແລ້ວ
ມີລິດ ຮູ້ຈິດຂອງຜູ້ອື່ນ
ແລະບັນລຸທິບພະໂສຕະຍານ

[๕๗๐] ອັນໜຶ່ງ ເຮົາອອກຈາກເຮືອນບວດເປັນບັນພະຊິດເພື່ອປະໂຫຍດໃດ
ປະໂຫຍດນັ້ນເປັນທີ່ສິ້ນສຸດໄປແຫ່ງສັງໂຍດທັງປວງ ເຮົາບັນລຸແລ້ວ

# ๘. ເຕຖິດສະການິເຖຣະຄາຖາ

## ພາສິດຂອງພຣະເຕຖິດສະການິເຖຣະ

(ມານກ່າວວ່າ)

[๕๗๑] ເຂົ້າເປືອກເຂົາເກັບໄວ້ໃນເລົ້າ
ເຂົ້າສາລີກໍຍັງຢູ່ໃນລານ
ຂ້ານ້ອຍບໍ່ໄດ້ກ້ອນເຂົ້າ
ບັດນີ້ຍັງຈະເຮັດແນວໃດ

(ພຣະເຕຖິດສະການິເຖຣະກ່າວວ່າ)

[๕๗๘] ທ່ານເຫຼື້ອມໃສແລ້ວ
ຈົ່ງຣະນຶກເຖິງພຣະພຸດທະເຈົ້າ
ເຊິ່ງມີພຣະຄຸນຫາປະມານບໍ່ໄດ້
ຈະເປັນຜູ້ມີສະຣີຣະທີ່ປີຕິຖືກຕ້ອງແລ້ວເບີກບານໃຈເນືອງ ໆ

[๕๗๕] ທ່ານເຫຼື້ອມໃສແລ້ວ
ຈົ່ງຣະນຶກເຖິງພຣະທຳ
ເຊິ່ງມີພຣະຄຸນຫາປະມານບໍ່ໄດ້
ຈະເປັນຜູ້ມີສະຣີຣະທີ່ປີຕິຖືກຕ້ອງແລ້ວ ເບີກບານໃຈເນືອງ ໆ

[๕๗๘] ທ່ານເຫຼື້ອມໃສແລ້ວ

ຈຶ່ງຣະນຶກເຖິງພຣະສົງ
ເຊິ່ງມີພຣະຄຸນຫາປະມານບໍ່ໄດ້
ຈະເປັນຜູ້ມີສະຣີຣະທີ່ປີຕິຖືກຕ້ອງແລ້ວ ເບີກບານໃຈເນືອງ ໆ

(ມານກ່າວວ່າ)

[໔໒໘] ທ່ານຢູ່ກາງແຈ້ງ
ຕະຫຼອດຣາຕີທີ່ເຢັນ ເຊິ່ງເປັນລະດູໜາວເຫຼົ່ານີ້
ທ່ານຢ່າໄດ້ຖືກຄວາມໜາວລົບກວນ ບຸງດບຸງນເລີຍ
ນິມົນເຂົ້າວິຫານເຊິ່ງມີບານປະຕູໜ້າຕ່າງມິດຊິດເທີ້ນ

(ພຣະເຕກິດສະການິເຖຣະກ່າວວ່າ)

[໔໒໙] ເຮົາຈະສຳຜັດອັບປະມັນຍາທັງສີ່ ໆ
ແລະຈະມີຄວາມສຸກ ຢູ່ດ້ວຍອັບປະມັນຍາເຫຼົ່ານັ້ນ
ເຮົາຈະຢູ່ຢ່າງບໍ່ຫວັ່ນໄຫວ
ບໍ່ເດືອດຮ້ອນ ຍ້ອນຄວາມໜາວຢູ່

## ໔. ມະຫານາຄະເຖຣະຄາຖາ

### ພາສິດຂອງພຣະມະຫານາຄະເຖຣະ

(ພຣະມະຫານາຄະເຖຣະໄດ້ກ່າວ ໖ ຄາຖາໄວ້ດັ່ງນີ້ວ່າ)

[໔໓໐] ຜູ້ໃດບໍ່ມີຄວາມເຄົາລົບໃນເພື່ອນພົມມະຈາຣີທັງຫຼາຍ
ຜູ້ນັ້ນ ຍ່ອມເສື່ອມຈາກພຣະສັດທຳ
ຄືປາໃນນ້ຳໜ້ອຍ

[໔໓໑] ຜູ້ໃດບໍ່ມີຄວາມເຄົາລົບໃນເພື່ອນພົມມະຈາຣີທັງຫຼາຍ
ຜູ້ນັ້ນ ບໍ່ງອກງາມໃນພຣະສັດທຳ
ຄືພືດເນົ່າໃນໄຮ່ນາ

[໔໓໒] ຜູ້ໃດບໍ່ມີຄວາມເຄົາລົບໃນເພື່ອນພົມມະຈາຣີທັງຫຼາຍ
ຜູ້ນັ້ນ ຍ່ອມຢູ່ຫ່າງໄກຈາກນິບພານ
ໃນພຣະສາດສະໜາຂອງພຣະສາດສະດາຜູ້ເປັນພຣະທຳມະຣາຊາ

[໓໙໐] ຜູ້ໃດມີຄວາມເຄົາລົບໃນເພື່ອນພົມມະຈາຣີທັງຫຼາຍ
ຜູ້ນັ້ນ ຍ່ອມບໍ່ເສື່ອມຈາກພຣະສັດທຳ
ຄືປາໃນນ້ຳຫຼາຍ

[໓໙໑] ຜູ້ໃດມີຄວາມເຄົາລົບໃນເພື່ອນພົມມະຈາຣີທັງຫຼາຍ
ຜູ້ນັ້ນຍ່ອມງອກງາມໃນພຣະສັດທຳ
ຄືພືດດີໃນໄຮ່ນາ

[໓໙໒] ຜູ້ໃດມີຄວາມເຄົາລົບໃນເພື່ອນພົມມະຈາຣີທັງຫຼາຍ
ຜູ້ນັ້ນຍ່ອມຢູ່ໃກ້ນິບພານ
ໃນພຣະສາດສະໜາຂອງພຣະສາດສະດາຜູ້ເປັນພຣະທຳມະຣາຊາ

## ໒. ກຸນລະເຖຣະຄາຖາ

### ພາສິດຂອງພຣະກຸນລະເຖຣະ

(ພຣະກຸນລະເຖຣະໄດ້ກ່າວ ໖ ຄາຖາໄວ້ດັ່ງນີ້ວ່າ)

[໓໙໓] ກຸນລະພິກຂຸ ໄປປ່າຊ້າຜີດິບ
ໄດ້ເຫັນຊາກສົບແມ່ຍິງທີ່ຖືກປະຖິ້ມໄວ້ໃນປ່າຊ້າ
ທັງຖືກໝູ່ໜອນບ້ອນກັດກິນ

[໓໙໔] ກຸນລະເອີຍ ເຈົ້າຈົ່ງພິຈາລະນາເບິ່ງຮ່າງກາຍທີ່ກະສັບກະສ່າຍ
ບໍ່ສະອາດ ເປື່ອຍເນົ່າ ຫຼັ່ງຂອງບໍ່ສະອາດເຂົ້າອອກ
ທີ່ພວກຄົນຈ້ຳຊົມຊື່ນກັນຫຼາຍ
[໓໙໕] ເຮົາໃຊ້ແວ່ນຄືພຣະທຳແຍງເບິ່ງຮ່າງກາຍນີ້
ເຊິ່ງວ່າງເປົ່າທັງພາຍໃນແລະພາຍນອກ
ເພື່ອບັນລຸຍານທັດສະນະ[១]

[໓໙໖] ຮ່າງກາຍຂອງເຮົານີ້ ກັບຊາກສົບນັ້ນ ກໍຄືກັນ
ຊາກສົບນັ້ນກັບຮ່າງກາຍຂອງເຮົານີ້ ກໍຄືກັນ
ຮ່າງກາຍນີ້ ທ່ອນລຸ່ມ ທ່ອນເທິງ ກໍຄືກັນ
ທ່ອນເທິງ ທ່ອນລຸ່ມກໍຄືກັນ

[໓໙໗] ຮ່າງກາຍກາງເວັນ ກາງຄືນ ກໍຄືກັນ

ກາງຄືນ ກາງເວັນ ກໍຄືກັນ
ໃນການກ່ອນກັບພາຍຫຼັງ ກໍຄືກັນ
ພາຍຫຼັງ ກັບການກ່ອນກໍຄືກັນ

[໓໙໗] ອິດສະຣະຊົນຜູ້ພຽບພ້ອມດ້ວຍການສຸກ
ທີ່ເຂົາປົນເປີດ້ວຍດົນຕີເຄື່ອງຫ້າ ຍ່ອມບໍ່ຍິນດີເຊັ່ນນັ້ນ
ຄືກັບເຮົາຜູ້ມີຈິດແນ່ວແນ່
ພິຈາລະນາເຫັນທຳແຈ່ມແຈ້ງໂດຍຖືກຕ້ອງ

# ໕. ມາລຸງກະຍະປຸດຕະເຖຣະຄາຖາ

## ພາສິດຂອງພຣະມາລຸງກະຍະບຸດເຖຣະ

(ພຣະມາລຸງກະຍະບຸດເຖຣະສະແດງທຳດ້ວຍ ໖ ຄາຖາໄວ້ດັ່ງນີ້ວ່າ)

[໓໙໙] ຕັນຫາ ຍ່ອມຈະເລີນແກ່ມະນຸດ ຜູ້ປະພຶດຜະໝາດ
ຄືເຄືອເຂົາຈະເລີນຢູ່ໃນປ່າ
ເຂົາຍ່ອມພະເນຈອນໄປມາ
ຄືວານອນທີ່ຕ້ອງການໝາກໄມ້ ທ່ຽວພະເນຈອນໄປໃນປ່າ

[໔໐໐] ຕັນຫາທີ່ຊົ່ວຊາມຊ່ານໄປໃນໂລກນີ້
ຍ່ອມຄອບງຳບຸກຄົນໃດໄວ້ໄດ້
ຄວາມໂສກຍ່ອມຈະເລີນແກ່ບຸກຄົນນັ້ນ
ຄືຫຍ້າຄົມບາງທີ່ຖືກຝົນຕົກໃສ່ແລ້ວຈະເລີນງອກງາມຂຶ້ນ

[໔໐໑] ສ່ວນບຸກຄົນໃດ ຄອບງຳຕັນຫາທີ່ຊົ່ວຊາມນັ້ນ
ເຊິ່ງລ່ວງໄດ້ຍາກ ໃນໂລກໄວ້ໄດ້
ຄວາມໂສກຍ່ອມຕົກໄປຈາກບຸກຄົນນັ້ນ
ຄືຢາດນ້ຳກິ້ງຕົກໄປຈາກໃບບົວ

[໔໐໒] ຍ້ອນເຫດນັ້ນ ເຮົາຂໍເຕືອນທ່ານທັງຫຼາຍ
ຂໍທ່ານທັງຫຼາຍທີ່ປະຊຸມກັນໃນບ່ອນນີ້ ຈົ່ງມີຄວາມຈະເລີນ
ຂໍທ່ານທັງຫຼາຍຈົ່ງຂຸດຮາກເຫງົ້າແຫ່ງຕັນຫາ
ຄືຜູ້ຕ້ອງການຫຍ້າແຝກຂຸດຫຍ້າແຝກຢູ່

ມານຢ່າໄດ້ທຳລາຍທ່ານທັງຫຼາຍຢູ່ບໍ່ສິ້ນສຸດ
ຄືກະແສນ້ຳທຳລາຍໄມ້ອໍ້

[໔໐໓] ທ່ານທັງຫຼາຍ ຈົ່ງເຮັດຕາມພຣະພຸດທະພົດ
ຂະນະຢ່າໄດ້ລ່ວງເລີຍທ່ານທັງຫຼາຍໄປສາ
ຍ້ອນເຫຼົ່າຊົນທີ່ປ່ອຍໃຫ້ຂະນະລ່ວງເລີຍໄປ
ແອອັດກັນໃນນະຮົກ ເສົ້າໂສກຢູ່

[໔໐໔] ຄວາມຜະໝາດຄືຄວາມເລີນເລີ່ ຈັດເປັນທຸລີ
ທຸລີເກີດຈາກຄວາມຜະໝາດ
ບຸກຄົນເພິ່ງຖອນລູກສອນທີ່ສຽບຢູ່ໃນຫະໄທຂອງຕົນ
ດ້ວຍຄວາມບໍ່ຜະໝາດ ແລະດ້ວຍວິດຊາເທີ້ນ

## ໖. ສັບປະທາສະເຖຣະຄາຖາ

### ພາສິດຂອງພຣະສັບປະທາດເຖຣະ

(ພຣະສັບປະທາດເຖຣະໄດ້ກ່າວ ໖ ຄາຖາໄວ້ດັ່ງນີ້ວ່າ)

[໔໐໕] ຕັ້ງແຕ່ເຮົາບວດມາໄດ້ ໒໕ ພັນສາ
ບໍ່ໄດ້ຄວາມສະງົບໃຈ ແມ່ນພຽງດີດນິ້ວມື

[໔໐໖] ເຮົາບໍ່ໄດ້ເອກັກຄະຕາຈິດ[๑] ຖືກກາມຣາຄະລົບກວນ
ປະຄອງແຂນຮ່ຳໄຮ
ບໍ່ຍອມອອກຈາກວິຫານໂດຍຄິດວ່າ

[໔໐໗] ຊີວິດຈະມີປະໂຫຍດອັນໃດສຳລັບເຮົາ
ເຮົາຈະນຳອາວຸດມາ ຄົນຄືເຮົາ ຈະບອກລາສິກຂາເຮັດຫຍັງນໍ
ຄວນຕາຍສາເທີ້ນ

[໔໐໘] ເວລານັ້ນ ເຮົາໄດ້ສວຍມີດແຖຂຶ້ນຢູ່ເທິງຕຽງນ້ອຍ
ໄດ້ຈໍ້າມີດແຖ ເພື່ອຈະປາດຫຼອດຄໍຂອງຕົນ

[໔໐໙] ແຕ່ນັ້ນ ໂຍນິໂສມະນະສິການກໍເກີດຂຶ້ນແກ່ເຮົາ
ໂທດກໍຜາກົດ ຄວາມເບື່ອໜ່າຍກໍເກີດຂຶ້ນພ້ອມກັນ

[໔໑໐] ຕໍ່ແຕ່ນັ້ນ ຈິດຂອງເຮົາກໍລຸດພົ້ນ
ທ່ານຈຶ່ງແນມເຫັນທຳວ່າເປັນທຳດີງາມ
ເຮົາບັນລຸວິດຊາ ໓
ໄດ້ເຮັດຕາມຄຳສັ່ງສອນຂອງພຣະພຸດທະເຈົ້າແລ້ວ

## ໗. ກາຕິຍານະເຖຣະຄາຖາ

### ພາສິດຂອງພຣະກາຕິຍານະເຖຣະ

(ພຣະກາຕິຍານະເຖຣະໄດ້ກ່າວ ໖ ຄາຖາໄວ້ແນວນີ້)

[໔໑໑] ລຸກຂຶ້ນນັ່ງເທີ້ນ ກາຕິຍານະ ຢ່າມົວນອນຫຼັບຢູ່ເລີຍ
ຈົ່ງຕື່ນເທີ້ນ ຢ່າໃຫ້ມັດຈຸຣາດ
ເຊິ່ງເປັນໝູ່ກອງຂອງຄວາມຜະໝາດ
ຊະນະທ່ານຜູ້ຂີ້ຄ້ານດ້ວຍອຸບາຍທີ່ໂກງໄດ້ເລີຍ

[໔໑໒] ຊາດແລະຊະຣາຄອບງຳທ່ານ
ຄືກຳລັງຄື້ນມະຫາສະມຸດ
ທ່ານນັ້ນຈົ່ງເຮັດທີ່ເພິ່ງຢ່າງດີສຳລັບຕົນສາ
ຍ້ອນທ່ານບໍ່ມີບ່ອນເພິ່ງແນວອື່ນ
ທັງໃນໂລກນີ້ແລະໂລກໜ້າ

[໔໑໓] ພຣະສາດສະດາຊີ້ບອກທາງນີ້
ເຊິ່ງລ່ວງພົ້ນກິເລດເຄື່ອງຂ້ອງ
ແລະຈາກໄພຄືຊາດແລະຊະຣາ
ທ່ານຈົ່ງຢ່າໄດ້ຜະໝາດຕະຫຼອດຍາມຕົ້ນແລະຍາມປາຍ
ໝັ່ນເຮັດຄວາມພຽນໃຫ້ໝັ້ນເທີ້ນ

[໔໑໔] ຈົ່ງປົດເປື້ອງເຄື່ອງມັດທັງຫຼາຍທີ່ເປັນຂອງເດີມສາ
ໃຊ້ສອຍຜ້າສັງຄາຕິ ແຖຜົມດ້ວຍມີດແຖ
ແລະສັນອາຫານທີ່ທ່ຽວພິກຂາຈານໄດ້ມາ
ຢ່າເຫັນແກ່ການຫຼິ້ນສະໜຸກສະໜານ
ຢ່າເຫັນແກ່ການຫຼັບນອນ ຈົ່ງໝັ່ນເຂົ້າຊານເທີ້ນ ກາຕິຍານະ

[໔໑໕] ທ່ານຈຶ່ງເພ່ງຊານ ຊະນະກິເລດ
ທ່ານເປັນຜູ້ສະຫຼາດໃນທາງທີ່ປອດໂປ່ງຈາກໂຍຄະ
ຈະເຖິງຄວາມບໍລິສຸດເຊິ່ງບໍ່ມີຄວາມບໍລິສຸດອື່ນໃດຍິ່ງກວ່າແລ້ວປະຣິນິບພານ
ຄືໄຟລຸກຮຸ່ງທີ່ເຂົາດັບດ້ວຍນ້ຳ

[໔໑໖] ປະທີບທີ່ມີແປວໄຟໜ້ອຍ ຍ່ອມດັບໄປຍ້ອນລົມ
ຄືເຄືອເຂົາລຸດຫຼົ່ນຍ້ອນລົມ ສັນໃດ
ທ່ານຜູ້ມີໂຄດຄືພຣະອິນ ແມ່ນທ່ານກໍສັນນັ້ນ
ຢ່າຖືໝັ້ນ ຈຶ່ງກຳຈັດມານສາ
ຈຶ່ງປາສະຈາກຄວາມກຳໜັດພໍໃຈໃນເວທະນາທັງຫຼາຍ
ຈຶ່ງເປັນຜູ້ສະງົບເຢັນ ຄອຍຖ້າການປະຣິນິບພານໃນອັດຕະພາບນີ້ແລ

## ໗. ມິຄະຊາລະເຖຣະຄາຖາ

### ພາສິດຂອງພຣະມິຄະຊາລະເຖຣະ

(ພຣະມິຄະຊາລະເຖຣະໄດ້ກ່າວ ໖ ຄາຖາໄວ້ດັ່ງນີ້ວ່າ)

[໔໑໗] ພຣະພຸດທະເຈົ້າຜູ້ເປັນເຜົ່າພັນແຫ່ງພຣະອາທິດ
ຊົງມີພຣະຈັກຂຸ ໄດ້ຊົງສະແດງໄວ້ດີແລ້ວ ເຊິ່ງພຣະທຳ
ທີ່ລ່ວງສັງໂຍດໄດ້ທັງໝົດ
ເຮັດວັດຕະໃຫ້ພິນາດໄປສິ້ນ

[໔໑໘] ເປັນທຳທີ່ນຳເຫຼົ່າສັດອອກຈາກສົງສານ
ເປັນເຄື່ອງຂ້າມພົ້ນສົງສານໄດ້
ເຮັດຮາກເຫງົ້າແຫ່ງຕັນຫາໃຫ້ເຫືອດແຫ້ງໄປ
ທຳລາຍກຳກິເລດເຊິ່ງເປັນບ່ອນຕັ້ງແຫ່ງຄວາມອາຄາດທີ່ມີຮາກເປັນພິດ
ໃຫ້ເຖິງຄວາມດັບ

[໔໑໙] ພຣະທຳເຊິ່ງເປັນເຄື່ອງກຳຈັດກຳໃຫ້ສິ້ນສຸດ
ອັນພຣະພຸດທະເຈົ້າສະແດງແລ້ວ
ເພື່ອທຳລາຍຮາກເຫງົ້າອະວິດຊາ ໃຫ້ຕົກໄປດ້ວຍວະຊິຣະຍານ
ເມື່ອການຢຶດຖືວິນຍານທັງຫຼາຍຜາກົດຂຶ້ນ

[໔໕໐] ເປັນທຳໃຫ້ຮູ້ເວທະນາທັງຫຼາຍໄດ້ແຈ່ມແຈ້ງ
ປິດເປື້ອງອຸປາທານ
ພິຈາລະນາເຫັນພົບຄືຂຸມຖ່ານໄຟດ້ວຍຍານ

[໔໕໑] ເປັນທຳຍັ່ງຮູ້ໄດ້ຍາກ ເລິກເຊິ່ງ
ຫ້າມຄວາມແກ່ແລະຄວາມຕາຍໄດ້
ເປັນທາງປະເສີດປະກອບດ້ວຍອົງ ໘ ສະງົບທຸກ ກະເສມ

[໔໕໒] ເປັນທຳເຄື່ອງເຫັນແສງສະຫວ່າງຕາມຄວາມເປັນຈິງ
ເຖິງຄວາມປອດໂປ່ງຢ່າງຫຼາຍ ສະງົບ ມີຄວາມຈະເລີນເປັນບ່ອນສຸດ
ຍ້ອນຊົງຮູ້ກຳວ່າເປັນກຳ ແລະວິບາກໂດຍຄວາມເປັນວິບາກແຫ່ງທຳທີ່ອີງອາໄສກັນແລະກັນເກີດຂຶ້ນ

## ໔. ເຊນຕະປຸໂລຫິດປຸດຕະເຖຣະຄາຖາ
## ພາສິດຂອງພຣະເຊນຕະປຸໂລຫິດບຸດເຖຣະ

(ພຣະເຊນຕະປຸໂລຫິດບຸດເຖຣະໄດ້ກ່າວ ໖ ຄາຖາໄວ້ດັ່ງນີ້ວ່າ)

[໔໕໓] ເຮົາເປັນຜູ້ມົວເມົາດ້ວຍຄວາມເມົາຍ້ອນຊາດສະກຸນ
ໂພຄະ ອິດສະຣິຍະຍົດ ຊວດຊົງ ຜິວພັນແລະຮູບຮ່າງ
ເຮົາໄດ້ປະພຶດມົວເມົາດ້ວຍຄວາມເມົາແນວອື່ນອີກ

[໔໕໔] ເຮົາເປັນຄົນໂງ່ ຖືກອະຕິມານະກຳຈັດ
ມີໃຈກະດ້າງຈັດ ຊູມານະຄືທຸງ
ຈຶ່ງບໍ່ສຳຄັນໃຜ ໆ ວ່າ ສະເໝີກັບຕົນແລະຍິ່ງກວ່າຕົນ

[໔໕໕] ກະດ້າງຍ້ອນມານະ ບໍ່ເອື້ອເຟື້ອ ຈຶ່ງບໍ່ຍອມຂາບໄຫວ້ໃຜ ໆ
ແມ່ນເປັນມານດາ ບິດາ ແລະແມ່ນຜູ້ອື່ນທີ່ຄວນເຄົາລົບ

[໔໕໖] ເຮົາໄດ້ພົບພຣະສາດສະດາຜູ້ຊົງແນະນຳ
ເລີດປະເສີດສູງສຸດກວ່າສາຣະຖີທັງຫຼາຍ
ຊົງຮຸ່ງເຮືອງຢູ່ຄືພຣະອາທິດ ມີພິກຂຸສົງຫ້ອມລ້ອມ

[໔໕໗] ຈຶ່ງມີໃຈເຫຼື້ອມໃສ ລະຖິ້ມມານະແລະຄວາມມົວເມົາແລ້ວ
ຂາບໄຫວ້ພຣະສາດສະດາຜູ້ສູງສຸດກວ່າສັດທຸກໝູ່ເຫຼົ່າດ້ວຍຂະໜ່ອມ

[໔໘໗] ຄວາມຖືໂຕວ່າດີກວ່າເຂົາ ແລະຄວາມຖືໂຕວ່າຊົ່ວກວ່າເຂົາ
ເຮົາລະຖອນໄດ້ເດັດຂາດແລ້ວ
ອັດສະມິມານະເຮົາກໍຕັດຂາດແລ້ວ
ມານະທຸກຢ່າງເຮົາກໍທຳລາຍສາແລ້ວ

## ໑໐. ສຸມະນະເຖຣະຄາຖາ
## ພາສິດຂອງພຣະສຸມະນະເຖຣະ

(ພຣະສຸມະນະເຖຣະໄດ້ກ່າວ ໖ ຄາຖາໄວ້ດັ່ງນີ້ວ່າ)

[໔໘໙] ເມື່ອຄັ້ງເຮົາບວດໃໝ່ ມີອາຍຸໄດ້ ໗ ຂວບ ໂດຍກຳເນີດ
ໄດ້ຂົ່ມພະຍານາກ ຜູ້ມີລິດຫຼາຍດ້ວຍລິດ

[໔໓໐] ໄດ້ຕັກນ້ຳຈາກສະໃຫຍ່ອະໂນດາດມາຖວາຍພຣະອຸປັດຊາ
ພຣະສາດສະດາໄດ້ທອດພຣະເນດເຫັນເຮົາແລ້ວ ຕັດດັ່ງນີ້ວ່າ

[໔໓໑] ສາຣີບຸດ ທ່ານຈົ່ງເບິ່ງເດັກນ້ອຍນີ້ ຜູ້ມີໃຈຕັ້ງໝັ້ນດີພາຍໃນ
ກຳລັງຖືໝໍ້ນ້ຳມານີ້

[໔໓໔] ສາມະເນນຂອງພຣະອະນຸຣຸດທະ ມີຂໍ້ວັດປະຕິບັດໜ້າເຫຼື້ອມໃສ
ມີອິລິຍາບົດງົດງາມ ທັງແກ່ກ້າດ້ວຍລິດ

[໔໓໓] ອັນພຣະອະນຸຣຸດທະຜູ້ເປັນບຸຣຸດອາຊາໄນ
ເຝິກໃຫ້ເປັນບຸຣຸດອາຊາໄນ ຜູ້ເປັນຄົນດີເຝິກໃຫ້ເປັນຄົນດີ
ຜູ້ສຳເລັດກິດແລ້ວ ແນະນຳສັ່ງສອນແລ້ວ

[໔໓໔] ສຸມະນະສາມະເນນນັ້ນ ໄດ້ເຖິງຄວາມສະງົບຢ່າງຍິ່ງ
ເຮັດໃຫ້ແຈ້ງເຊິ່ງທຳອັນບໍ່ກຳເຮີບພຣະອະຣະຫັດຕະຜົນ
ແລ້ວຫວັງວ່າໃຜ ໆ ຢ່າເພິ່ງຮູ້ຈັກເຮົາ

## ໑໑. ນະຫາຕະກະມຸນິເຖຣະຄາຖາ
## ພາສິດຂອງພຣະນະຫາຕະກະມຸນິເຖຣະ

(ພຣະຜູ້ມີພຣະພາກເຈົ້າໄດ້ຕັດຖາມວ່າ)

[໔໓໕] ທ່ານເມື່ອຢູ່ໃນປ່າໃຫຍ່ ເປັນສະຖານທີ່ລຳບາກຫາປັດໄຈໄດ້ຍາກ
ຖືກໂຣກລົມລົບກວນ ຈັກເຮັດແນວໃດລະພິກຂຸ
ພຣະມະຫາຕະກະມຸນິເຖຣະ(ໄດ້ຂາບທູນວ່າ)

[໔໓໖] ຂ້າພຣະອົງຈະແຜ່ປີຕິສຸກອັນເຕັມປ່ຽມໄປທົ່ວຮ່າງກາຍ
ຄອບງຳແມ່ນປັດໄຈທີ່ເສົ້າໝອງ ຢູ່ໃນປ່າໃຫຍ່

[໔໓໗] ຈະຈະເລີນສະຕິປັດຖານ ໔ ອິນຊີ ໕ ພະລະ ໕
ແລະໂພດຊົງ ໗ ຢູ່ໃນປ່າໃຫຍ່

[໔໓໘] ພິຈາລະນາເນືອງ ໆ ເຖິງຈິດທີ່ບໍລິສຸດ
ເຊິ່ງລຸດພົ້ນຈາກກິເລດ ບໍ່ຂຸ່ນມົວ ຈະບໍ່ມີອາສະວະຢູ່

[໔໓໙] ອາສະວະທັງໝົດຂອງຂ້າພຣະອົງ
ທີ່ມີຢູ່ທັງພາຍໃນແລະພາຍນອກ
ຂ້າພຣະອົງຖອນຂຶ້ນໄດ້ບໍ່ເຫຼືອເລີຍ
ແລະຈະບໍ່ເກີດຂຶ້ນອີກ

[໔໔໐] ຂັນ ໕ ຂ້າພຣະອົງກຳນົດຮູ້ແລ້ວ
ຂັນເຫຼົ່ານັ້ນດຳລົງຢູ່ຢ່າງຖືກຕັດຮາກກົ່ນເຫງົ້າແລ້ວ
ຂ້າພຣະອົງໄດ້ບັນລຸຄວາມສິ້ນທຸກແລ້ວ ບັດນີ້ ບໍ່ມີການເກີດອີກ

## ໑໘. ພິມທັດຕະເຖຣະຄາຖາ

### ພາສິດຂອງພຣະພິມທັດຕະເຖຣະ

(ພຣະພິມທັດຕະເຖຣະໄດ້ກ່າວ ໖ ຄາຖາໄວ້ດັ່ງນີ້ວ່າ)

[໔໔໑] ສຳລັບຜູ້ທີ່ບໍ່ໂກດ ເຝິກຝົນຕົນມາແລ້ວ
ເປັນຢູ່ສະໝ່ຳສະເໝີ ລຸດພົ້ນຍ້ອນຮູ້ໂດຍຖືກຕ້ອງ
ສະງົບໝັ້ນຄົງ ຄວາມໂກດຈະມີແຕ່ບ່ອນໃດ

[໔໔໒] ຜູ້ໃດໂກດຕອບຜູ້ທີ່ໂກດ ຜູ້ນັ້ນຊື່ວກວ່າຜູ້ທີ່ໂກດນັ້ນແລ
ຍ້ອນຄວາມທີ່ໂກດຕອບນັ້ນ ຜູ້ທີ່ບໍ່ໂກດຕອບຜູ້ທີ່ໂກດ
ຊື່ວ່າຍ່ອມຊະນະສົງຄາມ ທີ່ຊະນະໄດ້ຍາກ

[໔໔໓] ຜູ້ທີ່ຮູ້ວ່າຜູ້ອື່ນໂກດເຄືອງແລ້ວມີສະຕິສະງົບຢູ່ໄດ້
ຊື່ວ່າປະພຶດປະໂຫຍດຕົນເອງແລະຜູ້ອື່ນທັງສອງຝ່າຍ

[໔໔໔] ເຫຼົ່າຊົນທີ່ບໍ່ເຂົ້າໃຈທຳ
ຍ່ອມສຳຄັນບຸກຄົນຜູ້ອົດກັ້ນຕໍ່ຕົນແລະຜູ້ອື່ນທັງສອງ
ນັ້ນວ່າເປັນຄົນໂງ່ຈ້າ

[໔໔໕] ຖ້າຄວາມໂກດເພິ່ງເກີດຂຶ້ນແກ່ທ່ານ
ທ່ານຈົ່ງຄຳນຶງເຖິງພຣະໂອວາດທີ່ອຸປະມາດ້ວຍເລື່ອຍ
ຖ້າຄວາມຢາກໃນຣົດເພິ່ງເກີດຂຶ້ນແກ່ທ່ານ
ທ່ານຈົ່ງຣະນຶກເຖິງພຣະໂອວາດທີ່ອຸປະມາດ້ວຍຊີ້ນບຸດ

[໔໔໖] ຖ້າຈິດຂອງທ່ານແລ່ນພ່ານໄປທັງໃນກາມແລະພົບ
ທ່ານຈົ່ງຟ້າວຂົ່ມໄວ້ດ້ວຍສະຕິຄືຄົນຫ້າມປະສຸສັດດື້ທີ່ກິນເຂົ້າກ້າ

## ໑໓. ສີຣິມັນທະເຖຣະຄາຖາ

### ພາສິດຂອງທ່ານພຣະສີຣິມັນທະເຖຣະ

(ພຣະສີຣິມັນທະເຖຣະໄດ້ກ່າວ ໖ ຄາຖາໄວ້ດັ່ງນີ້ວ່າ)

[໔໔໗] ທຸດຈະຣິດທີ່ປົດບັງໄວ້ຍ່ອມຮົ່ວຫົດ ທີ່ເປີດເຜີຍຍ່ອມບໍ່ຮົ່ວຫົດ
ຍ້ອນແນວນັ້ນ ຄວນເປີດເຜີຍທຸດຈະຣິດທີ່ປົດໄວ້ນັ້ນສາ
ທຸດຈະຣິດທີ່ເປີດເຜີຍນັ້ນ ຈະບໍ່ຮົ່ວຫົດໄດ້ດ້ວຍອາການແນວນີ້

[໔໔໘] ສັດໂລກຖືກມັດຈຸຣາດຖ້າກຳຈັດ ຖືກຊະຣາຫຸ້ມລ້ອມ
ຖືກລູກສອນຄືຕັນຫາຖ້າສຽບແທງ
ທັງຖືກຄວາມຢາກແຜດເຜົາຕະຫຼອດການ

[໔໔໙] ສັດໂລກ ຖືກມັດຈຸຣາດຖ້າກຳຈັດ ແລະຖືກຊະຣາຫຸ້ມລ້ອມ
ບໍ່ມີບ່ອນເພິ່ງ ຖືກບຽດບຽນຢູ່ປະຈຳ
ຄືໂຈນຖືກລົງອາດຍາ

[໔໕໐] ຊະຣາ ພະຍາທິ ມໍລະນະ ທັງ ໓ ປຽບຄືກອງໄຟ
ຍ່ອມມາຍ່ຳຍີສັດໂລກນີ້

ສັດໂລກນີ້ ບໍ່ມີກຳລັງທີ່ຈະຕໍ່ສູ້
ທັງບໍ່ມີຄວາມໄວທີ່ຈະໜີໄປ

[໔໕໑] ບຸກຄົນຄວນເຮັດມື້ຄືນບໍ່ໃຫ້ຂາດປະໂຍດ
ດ້ວຍການໃສ່ໃຈເຖິງວິປັດສະນາບໍ່ວ່າໜ້ອຍຫຼືຫຼາຍ
ຊີວິດຂອງຜູ້ທີ່ຜ່ານມື້ຄືນໄປທໍ່ໃດ
ກໍເປັນອັນຂາດໄປທໍ່ນັ້ນ

[໔໕໒] ມື້ຄືນສຸດທ້າຍ ຍ່ອມຄືບຄານເຂົ້າໄປໃກ້ບຸກຄົນ
ທຸກອິລິຍາບົດ ຄື ຢືນ ຍ່າງ ນັ່ງ ຫຼືນອນ
ຍ້ອນແນວນັ້ນ ທ່ານບໍ່ເພິ່ງຜະໝາດການເວລາ

## ໑໔. ສັບພະກາມີເຖຣະຄາຖາ
### ພາສິດຂອງພຣະສັບພະກາມີເຖຣະ

(ພຣະສັບພະກາມີເຖຣະໄດ້ກ່າວ ໖ ຄາຖາໄວ້ດັ່ງນີ້ວ່າ)

[໔໕໓] ສັດສອງຕີນນີ້ ບໍ່ສະອາດ ມີກິ່ນເໝັນ
ເຕັມໄປດ້ວຍຊາກສົບຕ່າງ ໆ
ຫຼັ່ງຂອງບໍ່ສະອາດອອກທົ່ວທັງຮ່າງກາຍ
ຕ້ອງບໍລິຫານຢູ່ປະຈຳ

[໔໕໔] ກາມມະຄຸນ ໕ ຍ່ອມລວງບຽດບຽນປຸຖຸຊົນ
ຄືນາຍພານແອບໃຊ້ເຄື່ອງດັກ ດັກເນື້ອ
ຄືຊາວປະມົງໃຊ້ເບັດຕຶກປາ
(ແລະ)ຄືນາຍພານເນື້ອໃຊ້ຕັງດັກລິງ

[໔໕໕] ກາມມະຄຸນ ໕ ເຫຼົ່ານັ້ນ ຄື ຮູບ ສຽງ ກິ່ນ ຣົດ
ແລະໂຜດຖັບພະທີ່ໜ້າພໍໃຈ ຍ່ອມຜາກົດໃນເຮືອນຮ່າງແມ່ຍິງ
[໔໕໖] ເຫຼົ່າປຸຖຸຊົນທີ່ມີຈິດກຳໜັດ ສ້ອງເສບແມ່ຍິງເຫຼົ່ານັ້ນຢູ່
ຍ່ອມຂະຫຍາຍສັງສາຣະວັດທີ່ເປັນຕາຢ້ານ ຍ່ອມກໍ່ພົບໃໝ່ບໍ່ມີສິ້ນສຸດ
[໔໕໗] ສ່ວນຜູ້ໃດເວັ້ນຂາດສະຕິເຫຼົ່ານັ້ນ
ຜູ້ນັ້ນຊື່ວ່າມີສະຕິ ກ້າວລ່ວງຕັນຫາທີ່ຊ່ານໄປໃນໂລກນີ້ໄດ້ດ້ວຍດີ
ຄືຄົນກຳຈັດທິວງູຈາກຕີນ

[໔໕໗] ເຮົາເຫັນໂທດໃນກາມທັງຫຼາຍ
ເຫັນການອອກບວດໂດຍຄວາມກະເສມ
ພາກຈາກກາມໄດ້ທັງໝົດແລ້ວໄດ້ເຖິງຄວາມສິ້ນອາສະວະ

**ສັກກະນິບາດ ຈົບ**

## ລວມເລື້ອງພຣະເຖຣະທີ່ມີໃນນິບາດນີ້ ຄື

໑. ພຣະອຸຣຸເວລະກັດສະປະເຖຣະ
໓. ພຣະມະຫານາຄະເຖຣະ
໕. ພຣະມາລຸງກະຍະບຸດເຖຣະ
໗. ພຣະກາຕິຍານະເຖຣະ
໙. ພຣະເຊນຕະປຸໂລຫິຕະບຸດເຖຣະ
໑໑. ພຣະນະຫາຕະກະມຸນິເຖຣະ
໑໓. ພຣະສິຣິມັນທະເຖຣະ
໒. ພຣະເຕກິດສະການິເຖຣະ
໔. ພຣະກຸນລະເຖຣະ
໖. ພຣະສັບປະທາດເຖຣະ
໘. ພຣະມິຄະຊາລະເຖຣະ
໑໐. ພຣະສຸມະນະເຖຣະ
໑໒. ພຣະພົມທັດຕະເຖຣະ
໑໔. ພຣະສັບພະກາມິເຖຣະ

ໃນນິບາດນີ້ ມີ ໗໔ ຄາຖາ ແລະມີພຣະເຖຣະ ໑໔ ອົງ ດັ່ງນີ້ແລ

# ໗. ສັດຕະກະນິບາດ

## ໑. ສຸນທອນສະມຸດເຖຣະຄາຖາ

### ພາສິດຂອງພຣະສຸນທອນສະມຸດເຖຣະ

(ພຣະສຸນທອນສະມຸດເຖຣະໄດ້ກ່າວຄາຖາເຫຼົ່ານີ້ວ່າ)

[໔໕໙] ຍິງແພດສະຍາຕົກແຕ່ງຮ່າງກາຍ ນຸ່ງຜ້າສວຍງາມ
ທັດຊິງດອກໄມ້ ລູບທາຂອງຫອມ
ມີຕີນຍ້ອມດ້ວຍສີແດງໄດ້ໃສ່ຊຽງຕີນ ຢືນຢູ່

[໔໖໐] ນາງໄດ້ຖອດຊຽງຕີນ ປະນົມມືໄວ້ທາງໜ້າ
ເວົ້າເລົ້າໂລມເຮົາດ້ວຍຄຳເວົ້າທີ່ມ່ວນອ່ອນຫວານວ່າ

[໔໖໑] ທ່ານເປັນນັກບວດທີ່ຍັງໜຸ່ມແໜ້ນ ໂຜດເຊື່ອຟັງຂ້ານ້ອຍ
ຈົ່ງບໍຣິໂພກກາມທີ່ເປັນຂອງມະນຸດ

ຂ້ານ້ອຍຈະມອບຊັບສິນບັດໃຫ້ທ່ານ
ຂ້ານ້ອຍຂໍໃຫ້ສັດຈະແກ່ທ່ານ
ຖ້າທ່ານບໍ່ເຊື່ອ ຈະໃຫ້ຂ້ານ້ອຍນໍາໄຟມາທໍາການສະບົດຕໍ່ທ່ານກໍໄດ້

[໔໖໔] ເມື່ອເວລາທີ່ເຮົາທັງສອງແກ່ເຖົ້າຈົນຖືໄມ້ການເທົ້າຈຶ່ງຄ່ອຍບວດ
ເມື່ອເປັນແນວນີ້ນັບວ່າໄດ້ໄຊຊະນະໃນໂລກທັງ ໔

[໔໖໙] ເຮົາຍ້ອນເຫັນຍິງແພດສະຍາຕົກແຕ່ງຮ່າງກາຍ
ນຸ່ງຜ້າສວຍງາມ ປະນົມມືອ້ອນວອນ ຄືບ້ວງມັດຈຸຣາດທີ່ວາງດັກໄວ້

[໔໗໐] ແຕ່ນັ້ນ ໂຍນິໂສມະນະສິການກໍເກີດຂຶ້ນແກ່ເຮົາ
ໂທດກໍຜາກົດ ຄວາມເບື່ອໜ່າຍກໍເກີດຂຶ້ນພ້ອມ

[໔໗໑] ຕໍ່ຈາກນັ້ນ ຈິດຂອງເຮົາກໍລຸດພົ້ນ
ທ່ານຈົ່ງເຫັນທໍາວ່າເປັນທໍາດີງາມ
ເຮົາບັນລຸວິດຊາ ๓ ໄດ້ເຮັດຕາມຄໍາສັ່ງສອນຂອງພຣະພຸດທະເຈົ້າແລ້ວ

## ໔. ລະກຸນຕະກະພັດທິຍະເຖຣະຄາຖາ
## ພາສິດຂອງພຣະລະກຸນທະກະພັດທິຍະເຖຣະ

(ພຣະລະກຸນະຕະກະພັດທິຍະເຖຣະໄດ້ກ່າວຄາຖາເຫຼົ່ານີ້ວ່າ)

[໔໗໒] ພຣະພັດທິຍະພິກຂຸຢູ່ໃນອໍາພາຕະກາຣາມອັນສວຍງາມ
ໃກ້ປ່າຮົກ ໄດ້ຖອນຕັນຫາພ້ອມທັງຮາກແລ້ວ
ເປັນຜູ້ງາມດ້ວຍຄຸນມີສີນເປັນຕົ້ນ
ເຂົ້າຊານຢູ່ໃນປ່າຮົກ

[໔໗໓] ຜູ້ມັກບໍຣິໂພກການລາງພວກຍິນດີດ້ວຍສຽງກອງຕະໂພນ
ສຽງພິນແລະສຽງບັນເດາະ
ສ່ວນເຮົາຍິນດີໃນຄໍາສອນຂອງພຣະພຸດທະເຈົ້າຢູ່ທີ່ເຫງົ້າໄມ້

[໔໗໔] ຫາກພຣະພຸດທະເຈົ້າເພິ່ງປະທານພອນແກ່ເຮົາ
ແລະຫາກເຮົາເພິ່ງໄດ້ຮັບພອນນັ້ນ
ເຮົາຈະເພິ່ງຮັບກາຍະຄະຕາສະຕິທີ່ຊາວໂລກທັງມວນຄວນຈະເລີນຢູ່ປະຈໍາ

[໔໙໙] ເຫຼົ່າຊົນທີ່ດູໝິ່ນຮູບຮ່າງເຮົາ ແຕ່ຊົມສຽງເຮົາ
ຊື່ວ່າຍັງຕົກຢູ່ພາຍໃຕ້ອຳນາດສັນທະຣາຄະ ຍ່ອມບໍ່ຮູ້ຈັກເຮົາ

[໔໗໐] ຄົນໂງ່ຈ້ຳຖືກກິເລດປິດກັ້ນໄວ້ໂດຍຮອບ
ບໍ່ຮູ້ທັງພາຍໃນ ບໍ່ເຫັນທັງພາຍນອກ
ຍ່ອມຖືກດຶງຈູງໄປຕາມກະແສສຽງ

[໔໗໑] ແມ່ນຄົນທີ່ບໍ່ຮູ້ພາຍໃນ ເຫັນແຈ້ງແຕ່ພາຍນອກ
ຊື່ວ່າເຫັນແຕ່ຜົນພາຍນອກ
ຍ່ອມຖືກດຶງຈູງໄປຕາມກະແສສຽງ

[໔໗໔] ສ່ວນຄົນທີ່ມີຄວາມເຫັນບໍ່ຖືກປິດກັ້ນ
ຮູ້ແຈ້ງທັງພາຍໃນ ເຫັນແຈ້ງທັງພາຍນອກ
ຍ່ອມບໍ່ຖືກດຶງຈູງໄປຕາມກະແສສຽງ

## ໓. ພັນທະເຖຣະຄາຖາ

### ພາສິດຂອງພຣະພັດທະເຖຣະ

(ພຣະພັດທະເຖຣະໄດ້ກ່າວຄາຖາເຫຼົ່ານີ້ວ່າ)

[໔໗໓] ເຮົາເປັນບຸດຄົນດຽວ ຈຶ່ງໄດ້ເປັນທີ່ຮັກຂອງມານດາບິດາ
ຍ້ອນເຫດວ່າມານດາບິດາໄດ້ເຮົາມາດ້ວຍການປະພຶດຂໍ້ວັດປະຕິບັດ
ແລະການບວງສວງຫຼວງຫຼາຍ

[໔໗໔] ມານດາບິດາທັງສອງນັ້ນແລມຸ້ງຫວັງຄວາມຈະເລີນ
ສະແຫວງຫາປະໂຫຍດເພື່ອອະນຸເຄາະເຮົາ
ຈຶ່ງໄດ້ນ້ອມນຳເຮົາໄປຖວາຍພຣະພຸດທະເຈົ້າດ້ວຍຂາບທູນວ່າ

[໔໗໕] ບຸດຊາຍຄົນນີ້ຂ້າພຣະອົງທັງສອງໄດ້ມາໂດຍຍາກ
ເປັນສຸຂຸມາລະຊາດ ໄດ້ຮັບແຕ່ຄວາມສຸກ
ຂ້າແດ່ພຣະອົງຜູ້ຊົງເປັນບ່ອນເພິ່ງຂອງສັດໂລກ
ຂ້າພຣະອົງທັງສອງ ຂໍຖວາຍບຸດສຸດທີ່ຮັກຄົນນີ້
ໄວ້ເປັນຄົນຮັບໃຊ້ພຣະອົງຜູ້ຊົງຊະນະມານ

[໔໗໖] ພຣະສາດສະດາຊົງຮັບເຮົາແລ້ວ ໄດ້ຮັບສັ່ງກັບພຣະອານົນເຖຣະວ່າ
ຈົ່ງບວດໃຫ້ເດັກນີ້ ເດັກນີ້ຈັກເປັນຜູ້ຮອບຮູ້ໄດ້ວ່ອງໄວ

[໔໗໗] ພຣະສາດສະດາຜູ້ຊົງຊະນະມານ ເມື່ອຊົງສັ່ງໃຫ້ບວດໃຫ້ເຮົາແລ້ວ
ກໍໄດ້ສະເດັດເຂົ້າພຣະຄັນທະກຸດຕິ ເມື່ອພຣະອາທິດຍັງບໍ່ທັນອັດສະດົງຄົດ
ພໍເລີ່ມວິປັດສະນານັ້ນ ຈິດຂອງເຮົາກໍໄດ້ລຸດພົ້ນແລ້ວ

[໔໗໘] ແຕ່ນັ້ນ ພຣະສາດສະດາຊົງອອກຈາກຜົນສະມາບັດນັ້ນແລ້ວ
ສະເດັດອອກຈາກບ່ອນຫຼີບຫຼີກ ຊົງຮັບສັ່ງກັບເຮົາວ່າ
ພັດທະ ທ່ານຈົ່ງເປັນພິກຂຸມາເທີ້ນ
ພຣະວາຈານັ້ນໄດ້ເປັນການອຸປະສົມບົດຂອງເຮົາ

[໔໗໙] ເຮົາເກີດມາໄດ້ ໗ ປີ ກໍໄດ້ອຸປະສົມບົດ ໄດ້ບັນລຸວິດຊາ ໓
ໜ້າອັດສະຈັນຈິງ ຄວາມທີ່ທຳເປັນທຳດີ

## ໔. ໂສປາກະເຖຣະຄາຖາ

### ພາສິດຂອງພຣະໂສປາກະເຖຣະ

(ພຣະໂສປາກະເຖຣະໄດ້ກ່າວຄາຖາເຫຼົ່ານີ້ວ່າ)

[໔໘໐] ເຮົາໄດ້ເຫັນພຣະພຸດທະເຈົ້າຜູ້ສູງສຸດກວ່ານໍຣະຊົນ
ສະເດັດຈົງກົມທີ່ຮົ່ມເງົາແຫ່ງພຣະຄັນທະກຸດຕິ
ໄດ້ເຂົ້າໄປເຝົ້າພຣະອົງເຊິ່ງເປັນບຸຣຸດຜູ້ສູງສຸດ ແລ້ວຖວາຍບັງຄົມ ໃນບ່ອນນັ້ນ

[໔໘໑] ໄດ້ຫົ່ມຈີວອນບ່ຽງບ່າ ປະນົມມື ຍ່າງຈົງກົມນຳພຣະອົງ
ຜູ້ເຊິ່ງປາສະຈາກກິເລດຄືທຸລີສູງສຸດກວ່າສັບພະສັດ

[໔໘໒] ລຳດັບນັ້ນ ພຣະອົງໄດ້ຕັດຖາມບັນຫາກັບເຮົາ
ເຮົາຊ່ຽວຊານຮອບຮູ້ບັນຫາທັງຫຼາຍ
ຈຶ່ງບໍ່ສະທົກສະທ້ານແລະຢ້ານກົວ
ໄດ້ພະຍາກອນຖວາຍພຣະສາດສະດາ

[໔໘໓] ເມື່ອເຮົາແກ້ບັນຫາຖວາຍສຳເລັດແລ້ວ
ພຣະຕະຖາຄົດເຈົ້າຊົງອະນຸໂມທະນາແລ້ວ

ຊິງຫຼຽວເບິ່ງພິກຂຸສິງໄດ້ຕັດເນື້ອຄວາມນີ້ວ່າ

[໔໗໔] ເປັນລາບຂອງຊາວອັງຄະແລະຊາວມະຄົດ
ທີ່ໂສປາກະພິກຂຸນີ້ບໍຣິໂພກ ຈີວອນ ບິນທະບາດ
ເສນາສະນະ ແລະຄິລານະປັດໄຈ
ແລະໄດ້ຕັດເຖິງການຕ້ອນຮັບແລະສາມີຈິກຳ
ຂອງຊາວອັງຄະແລະຊາວມະຄົດເຫຼົ່ານັ້ນ ວ່າເປັນລາບຂອງພວກເຂົາ

[໔໗໕] ໂສປາກະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປ ທ່ານຈົ່ງມາພົບເຮົາ
ແລະການແກ້ບັນຫານີ້ແລ ຈົ່ງເປັນການອຸປະສົມບົດຂອງທ່ານ

[໔໗໖] ເຮົາເກີດມາມີອາຍຸໄດ້ ໗ ຂວບ ກໍໄດ້ອຸປະສົມບົດແລ້ວ
ຍັງຊົງຮ່າງກາຍເຊິ່ງມີໃນພົບສຸດທ້າຍຢູ່
ໜ້າອັດສະຈັນຈິງ ຄວາມທີ່ທຳເປັນທຳດີ

## ໕. ສະຣະພັງຄະເຖຣະຄາຖາ

### ພາສິດຂອງພຣະສະຣະພັງຄະເຖຣະ

(ພຣະສະຣະພັງຄະເຖຣະໄດ້ກ່າວຄາຖາເຫຼົ່ານີ້ວ່າ)

[໔໗໗] ເຮົາໄດ້ໃຊ້ມືຫັກຕົ້ນແຂມ ເຮັດຕູບຢູ່ອາໄສ
ຍ້ອນເຫດນັ້ນ ເຮົາຈຶ່ງໄດ້ມີຊື່ໂດຍສົມມຸດວ່າສະຣະພັງຄະ

[໔໗໘] ມື້ນີ້ ເຮົາບໍ່ສົມຄວນໃຊ້ມືທັງສອງຫັກຕົ້ນແຂມອີກ
ພຣະສະມະນະໂຄດົມຜູ້ເຮືອງຍົດ
ຊົງບັນຍັດສິກຂາບົດທັງຫຼາຍສຳລັບພວກເຮົາແລ້ວ

[໔໗໙] ແຕ່ກ່ອນ ເຮົາຜູ້ຊື່ວ່າສະຣະພັງຄະບໍ່ເຄີຍໄດ້ເຫັນພະຍາດ[໑] ຄົບບໍລິບູນ
ພະຍາດນີ້ນັ້ນເຮົາຜູ້ເຮັດຕາມພຣະດຳຣັດຂອງພຣະສຳມາສຳພຸດທະເຈົ້າ
ຜູ້ເປັນເທບຍິ່ງກວ່າເທບໄດ້ເຫັນແລ້ວ

[໔໘໐] ພຣະສຳມາສຳພຸດທະເຈົ້າ ພຣະນາມວ່າ ວິປັດສີ ສິຂີ
ເວດສະພູ ກະກຸສັນທະ ໂກນາຄະມະນະ ແລະກັດສະປະ
ໄດ້ຊົງດຳເນີນໄປໂດຍທາງໃດແລ

ພຣະສຳມາສຳພຸດທະເຈົ້າພຣະນາມວ່າໂຄດົມກໍຊົງດຳເນີນໂດຍທາງນັ້ນ

[໔໙໑] ພຣະພຸດທະເຈົ້າທັງ ໗ ພຣະອົງປາສະຈາກຕັນຫາ
ບໍ່ຊົງຢຶດໝັ້ນ ຢັ່ງເຖິງຄວາມດັບ ສະເດັດອຸບັດໂດຍທຳກາຍ ຜູ້ໝັ້ນຄົງ
ໄດ້ຊົງສະແດງທຳນີ້ ຄື

[໔໙໘] ອະຣິຍະສັດ ໔ ອັນໄດ້ແກ່ ທຸກ ເຫດໃຫ້ເກີດທຸກ
ຄວາມດັບທຸກ ແລະທາງທີ່ດຳເນີນໄປໃຫ້ເຖິງຄວາມສິ້ນທຸກ
ດ້ວຍຊົງອະນຸເຄາະເຫຼົ່າສັດ

[໔໙໙] ທຸກອັນບໍ່ມີບ່ອນສຸດໃນສັງສາຣະວັດ
ຍ່ອມເປັນໄປບໍ່ໄດ້ໃນນິໂຣດທີ່ຊົງສະແດງໄວ້
ຍ້ອນກາຍນີ້ດັບໄປ ແລະຍ້ອນຊີວິດນີ້ສິ້ນໄປ ພົບໃໝ່ບໍ່ມີອີກ
ເຮົາເປັນຜູ້ລຸດພົ້ນດີແລ້ວຈາກສັບພະກິເລດແລະພົບທັງປວງ

**ສັດຕະກະນິບາດ ຈົບ**

## ລວມເລື່ອງພຣະເຖຣະທີ່ມີໃນນິບາດນີ້ ຄື

໑. ພຣະສຸນທອນສະມຸດເຖຣະ
໒. ພຣະພັດທະເຖຣະ
໕. ພຣະສະຣະພັງຄະເຖຣະ
໘. ພຣະລະກຸນຕະກະພັດທິຍະເຖຣະ
໔. ພຣະໂສປາກະເຖຣະ

ໃນສັດຕະກະນິບາດນີ້ ມີພຣະເຖຣະ ໕ ອົງ

ແລະມີ ໒໕ ຄາຖາ ດັ່ງນີ້ແລ

# ໗. ອັດຖະກະນິບາດ

## ໑. ມະຫາກັດຈາຍະນະເຖຣະຄາຖາ

### ພາສິດຂອງພຣະມະຫາກັດຈາຍະນະເຖຣະ

(ພຣະມະຫາກັດຈາຍະນະເຖຣະໄດ້ກ່າວຄາຖາເຫຼົ່ານີ້ວ່າ)

[໔໙໔] ພິກຂຸບໍ່ເພິ່ງເຮັດວຽກກໍ່ສ້າງໃຫ້ຫຼາຍ[໑]
ເພິ່ງເວັ້ນຫ່າງໝູ່ຊົນ
ບໍ່ເພິ່ງຂົນຂວາຍເພື່ອປະຈົບສະກຸນ
ພິກຂຸຜູ້ຂົນຂວາຍນັ້ນຊື່ວ່າຕິດໃນຣົດ
ຍ່ອມລະຖິ້ມປະໂຫຍດທີ່ຈະນຳຄວາມສຸກມາໃຫ້

[໔໙໕] ດ້ວຍວ່ານັກປາດມີພຣະພຸດທະເຈົ້າເປັນຕົ້ນ
ໄດ້ກ່າວການໄຫວ້ແລະການບູຊາໃນຕະກູນທັງຫຼາຍວ່າ
ເປັນເປືອກຕົມ ເປັນລູກສອນອັນແຫຼມຄົມເຊິ່ງຖອນຂຶ້ນໄດ້ຍາກ
ເປັນສັກກາຣະທີ່ຄົນຊົ່ວລະໄດ້ຍາກ

[໔໙໖] ພິກຂຸບໍ່ເພິ່ງແນະນຳໃຫ້ຄົນອື່ນກະທຳກຳຊົ່ວ
ແລະບໍ່ເພິ່ງສ້ອງເສບກຳຊົ່ວນັ້ນສາເອງ
ຍ້ອນສັດທັງຫຼາຍມີກຳເປັນເຜົ່າພັນ

[໔໙໗] ຄົນເຮົາຈະເປັນໂຈນຍ້ອນຄຳເວົ້າຂອງຜູ້ອື່ນກໍບໍ່ມີ
ຈະເປັນມຸນີຍ້ອນຄຳເວົ້າຂອງຜູ້ອື່ນກໍບໍ່ມີ
ແລະບຸກຄົນຮູ້ຈັກຕົນເອງວ່າເປັນແນວໃດ?
ແມ່ນເທບທັງຫຼາຍກໍຮູ້ຈັກເຂົາວ່າເປັນແນວນັ້ນ

[໔໙໘] ພວກອື່ນຍ່ອມບໍ່ຮູ້ວ່າ ພວກເຮົາຍ່ອຍຍັບຢູ່ໃນໂລກນີ້
ບັນດາຊົນເຫຼົ່ານັ້ນ ຊົນເຫຼົ່າໃດຮູ້ແຈ້ງຢູ່
ຄວາມຜິດກັນຖຽງກັນຍ່ອມລະງັບໄດ້ຈາກສຳນັກຂອງຄົນເຫຼົ່ານັ້ນ

[໔໙໙] ຜູ້ມີປັນຍາເຖິງຈະສິ້ນຊັບ ກໍເປັນຢູ່ໄດ້
ສ່ວນຄົນມີຊັບ ແຕ່ບໍ່ມີປັນຍາ ກໍເປັນຢູ່ບໍ່ໄດ້

[໕໐໐] ບຸກຄົນຍ່ອມໄດ້ຍິນສຽງທຸກຢ່າງດ້ວຍຫູ
ຍ່ອມເຫັນຮູບທຸກຢ່າງດ້ວຍຕາ
ສ່ວນນັກປາດບໍ່ເພິ່ງລະຖິ້ມທຸກຢ່າງທີ່ໄດ້ເຫັນ ທີ່ໄດ້ຍິນ

[໕໐໑] ຜູ້ເປັນປາດນັ້ນເຖິງມີຕາດີ ກໍເພິ່ງເຮັດເປັນຄືຄົນຕາບອດ
ເຖິງມີຫູດີ ກໍເພິ່ງເຮັດເປັນຄືຄົນຫູໜວກ
ເຖິງມີປັນຍາ ກໍເພິ່ງເຮັດເປັນຄືຄົນກືກ
ເຖິງມີກຳລັງ ກໍເພິ່ງເຮັດເປັນຄືຄົນອ່ອນແອ
ຄັນເມື່ອປະໂຫຍດເກີດຂຶ້ນແລ້ວ ເຖິງຈະນອນໃນເວລາໃກ້ຈະຕາຍ
ກໍຍັງເຮັດປະໂຫຍດໃຫ້ສຳເລັດໄດ້

## ໘. ສິຣິມິດຕະເຖຣະຄາຖາ

### ພາສິດຂອງພຣະສິຣິມິດຕະເຖຣະ

(ພຣະສິຣິມິດຕະເຖຣະໄດ້ກ່າວຄາຖາເຫຼົ່ານີ້ວ່າ)

[໕໐໒] ພິກຂຸໃດບໍ່ມັກໂກດ ບໍ່ຜູກໂກດ
ບໍ່ມີມາຍາ ບໍ່ສັບສໍ່
ພິກຂຸນັ້ນຜູ້ໝັ້ນຄົງລະໄປແລ້ວ
ຍ່ອມບໍ່ເສົ້າໂສກດ້ວຍຂໍ້ປະຕິບັດຕາມທີ່ກ່າວມານີ້

[໕໐໓] ພິກຂຸໃດບໍ່ມັກໂກດ ບໍ່ຜູກໂກດ ບໍ່ມີມາຍາ ບໍ່ສັບສໍ່
ພິກຂຸນັ້ນຄຸ້ມຄອງທະວານໄວ້ໄດ້ທຸກເມື່ອ ລະໄປແລ້ວ
ຍ່ອມບໍ່ເສົ້າໂສກດ້ວຍຂໍ້ປະຕິບັດຕາມທີ່ກ່າວມານີ້

[໕໐໔] ພິກຂຸໃດບໍ່ມັກໂກດ ບໍ່ຜູກໂກດ
ບໍ່ມີມາຍາ ບໍ່ສັບສໍ່
ມີສີນງາມ ພິກຂຸນັ້ນລະໄປແລ້ວ
ຍ່ອມບໍ່ເສົ້າໂສກດ້ວຍຂໍ້ປະຕິບັດຕາມທີ່ກ່າວມານີ້

[໕໐໕] ພິກຂຸໃດບໍ່ມັກໂກດ ບໍ່ຜູກໂກດ
ບໍ່ມີມາຍາ ບໍ່ສັບສໍ່
ເປັນກັນລະຍານະມິດ ພິກຂຸນັ້ນລະໄປແລ້ວ

ຍ່ອມບໍ່ເສົ້າໂສກດ້ວຍຂໍ້ປະຕິບັດຕາມທີ່ກ່າວມານີ້

[໔໐໖] ພິກຂຸໃດບໍ່ມັກໂກດ ບໍ່ຜູກໂກດ
ບໍ່ມີມາຍາ ບໍ່ສັບສໍ່
ມີປັນຍາດີ ພິກຂຸນັ້ນລະໄປແລ້ວ
ຍ່ອມບໍ່ເສົ້າໂສກໃນໂລກໜ້າດ້ວຍຂໍ້ປະຕິບັດຕາມທີ່ກ່າວມານີ້

[໔໐໗] ຜູ້ໃດມີສັດທາໃນພຣະຕະຖາຄົດເຈົ້າຕັ້ງໝັ້ນ ບໍ່ຫວັ່ນໄຫວ
ມີສີນ ແລະມີກັນລະຍານະທຳ
ທີ່ພຣະອະຣິຍະເຈົ້າປາຖະໜາແລະສັນເສີນ

[໔໐໘] ຜູ້ໃດມີຄວາມເຫຼື້ອມໃສໃນພຣະສົງ
ທັງມີຄວາມເຫັນຊື່
ພຣະອະຣິຍະເຈົ້າທັງຫຼາຍມີພຣະພຸດທະເຈົ້າເປັນຕົ້ນ
ໄດ້ຮຽກຜູ້ນັ້ນວ່າ ເປັນຜູ້ບໍ່ຂັດສົນ
ຊີວິດຂອງເຂົາກໍບໍ່ຂາດປະໂຫຍດ

[໔໐໙] ຍ້ອນແນວນັ້ນ ຜູ້ມີປັນຍາ
ເມື່ອຣະນຶກເຖິງຄຳສອນຂອງພຣະພຸດທະເຈົ້າທັງຫຼາຍ
ຈຶ່ງຄວນປະກອບສັດທາ ສີນ ຄວາມເຫຼື້ອມໃສ
ແລະຄວາມເຫັນທຳໄວ້ເນືອງ ໆ

## ໖. ມະຫາປັນຖະກະເຖຣະຄາຖາ

### ພາສິດຂອງພຣະມະຫາປັນຖະກະເຖຣະ

(ພຣະມະຫາປັນຖະກະເຖຣະໄດ້ກ່າວຄາຖາເຫຼົ່ານີ້ວ່າ)

[໔໑໐] ເມື່ອໃດ ເຮົາໄດ້ເຝົ້າພຣະສາດສະດາ
ຜູ້ບໍ່ມີໄພແຕ່ບ່ອນໃດເປັນຄັ້ງທຳອິດ
ເມື່ອນັ້ນ ເຮົາໄດ້ມີຄວາມສັງເວດ
ຍ້ອນໄດ້ເຝົ້າພຣະອົງຜູ້ເປັນບຸກຄົນສູງສຸດ

[໔໑໑] ຜູ້ໃດເພິ່ງໃຊ້ມືແລະຕີນນວດພຣະສາດສະດາຜູ້ຊົງສິຣິເຊິ່ງສະເດັດມາ
ຜູ້ນັ້ນເພິ່ງຍັງພຣະສາດສະດາໃຫ້ຍິນດີເຊັ່ນນັ້ນກໍບໍ່ແມ່ນ

[໕໑໔]　ເວລານັ້ນ ເຮົາໄດ້ລະຖິ້ມບຸດພັນລະຍາ ຊັບ ແລະເຂົ້າເປືອກ
ແຖຜົມ ແຖໜວດ ອອກບວດເປັນບັນພະຊິດ

[໕໑໕]　ເປັນຜູ້ເຖິງພ້ອມດ້ວຍສິກຂາແລະສາຊີບ
ສັງລວມດ້ວຍດີໃນອິນຊີທັງຫຼາຍ
ນອບນ້ອມພຣະສຳມາສຳພຸດທະເຈົ້າ
ໄດ້ຢູ່ຢ່າງເປັນຜູ້ບໍ່ປຣາໄຊມານ

[໕໑໖]　ຕໍ່ມາ ຄວາມມຸ້ງໝັ້ນທີ່ຈິດເຮົາປາຖະໜາໄວ້ວ່າ
ເມື່ອເຮົາຍັງຖອນລູກສອນຄືຕັນຫາອອກບໍ່ໄດ້
ເຮົາບໍ່ເພິ່ງນັ່ງເປົ່າແມ່ນພຽງບຶດດຽວ

[໕໑໗]　ເຊີນທ່ານເບິ່ງຄວາມພຽນແລະຄວາມບາກບັ່ນຂອງເຮົານັ້ນຜູ້ຢູ່ຢ່າງນີ້
ເຮົາໄດ້ບັນລຸວິດຊາ ໓ ໄດ້ເຮັດຕາມຄຳສັ່ງສອນຂອງພຣະພຸດທະເຈົ້າແລ້ວ

[໕໑໘]　ເຮົາຮູ້ເຖິງຂັນທີ່ອາໄສຢູ່ມາກ່ອນໄດ້
ຊຳຣະທິບພະຈັກຂຸໃຫ້ມົດຈົດແລ້ວ
ເປັນພຣະອະຣະຫັນ ຜູ້ຄວນແກ່ທັກຂິນາ
ລຸດພົ້ນແລ້ວ ບໍ່ມີອຸປະທິກິເລດ

[໕໑໙]　ຕໍ່ເມື່ອຣາຕີສິ້ນໄປ ພໍດວງອາທິດຂຶ້ນໄປ
ເຮົາໄດ້ນັ່ງຂັດສະມາທິເຮັດຕັນຫາໃຫ້ເຫືອດແຫ້ງໄປໄດ້ໝົດ

**ອັດຖະກະນິບາດ ຈົບ**

## ລວມເລື້ອງພຣະເຖຣະທີ່ມີໃນນິບາດນີ້ ຄື

໑. ພຣະມະຫາກັດຈາຍະນະເຖຣະ
໒. ພຣະສິຣິມິດຕະເຖຣະ
໓. ພຣະມະຫາປັນຖະກະເຖຣະ

ໃນອັດຖະກະນິບາດ ມີພຣະເຖຣະ ໓ ອົງ

ແລະມີ ໒໔ ຄາຖາ ດັ່ງນີ້ແລ

# ໙. ນະວະກະນິບາດ

## ໑. ພູຕະເຖຣະຄາຖາ

### ພາສິດຂອງພຣະພູຕະເຖຣະ

(ພຣະພູຕະເຖຣະໄດ້ກ່າວຄາຖາເຫຼົ່ານີ້ວ່າ)

[໔໑໗] ເມື່ອໃດ ບັນດິດກຳນົດຮູ້ທຸກວ່າ
ຊະຣາແລະມໍລະນະເປັນທຸກທີ່ປຸຖຸຊົນທັງຫຼາຍ
ຜູ້ຕິດຢູ່ໃນປັນຈະຂັນບໍ່ຮູ້ແຈ້ງ
ເປັນຜູ້ມີສະຕິ ເຂົ້າຊານຢູ່
ເມື່ອນັ້ນ ຍ່ອມບໍ່ໄດ້ຄວາມຍິນດີທີ່ປະເສີດຍິ່ງກວ່າ
ຄວາມຍິນດີໃນວິປັດສະນາ ມັກແລະຜົນນັ້ນ

[໔໑໘] ເມື່ອໃດ ບັນດິດລະຕັນຫາທີ່ຊ່ານໄປໃນອາລົມຕ່າງ ໆ
ອັນນຳທຸກມາໃຫ້
ນຳທຸກອັນເກີດຍ້ອນຄວາມຕໍ່ເນື່ອງແຫ່ງປະປັນຈະທຳ[១]
ມີສະຕິ ເຂົ້າຊານຢູ່
ເມື່ອນັ້ນ ຍ່ອມບໍ່ໄດ້ຄວາມຍິນດີທີ່ປະເສີດ
ຍິ່ງກວ່າຄວາມຍິນດີວິປັດສະນາ ມັກ ແລະຜົນນັ້ນ

[໔໒໐] ເມື່ອໃດ ບັນດິດສຳຜັດທາງອັນສູງສຸດ ປອດໂປ່ງ
ທີ່ໃຫ້ລຸເຖິງມັກມີອົງ ໗ ເປັນທີ່ຊຳຮະກິເລດໄດ້ໝົດ
ດ້ວຍປັນຍາ ມີສະຕິ ເຂົ້າຊານຢູ່
ເມື່ອນັ້ນ ຍ່ອມບໍ່ໄດ້ຄວາມຍິນດີທີ່ປະເສີດ
ຍິ່ງກວ່າຄວາມຍິນດີໃນວິປັດສະນາມັກແລະຜົນນັ້ນ

[໔໒໑] ເມື່ອໃດ ບັນດິດຈະເລີນສັນຕະບົດ[២]ເຊິ່ງບໍ່ມີຄວາມເສົ້າໂສກ
ປາສະຈາກກິເລດຄືທຸລີ ອັນປັດໄຈປຸງແຕ່ງບໍ່ໄດ້
ເປັນທີ່ຊຳຮະກິເລດໄດ້ໝົດ ຕັດກິເລດເຄື່ອງຜູກພັນຄືສັງໂຍດ
ເມື່ອນັ້ນ ຍ່ອມບໍ່ໄດ້ຄວາມຍິນດີທີ່ປະເສີດ
ຍິ່ງກວ່າຄວາມຍິນດີໃນວິປັດສະນາ ມັກ ແລະຜົນນັ້ນ

[໔໒໒] ເມື່ອໃດ ກອງຄືກ້ອນເຝື້ອພັ່ງພູໄປດ້ວຍສາຍຝົນ
ຄຳຣາມຢູ່ໃນທ້ອງຟ້າ ເຊິ່ງເປັນທາງໄປຂອງຝູງນົກໂດຍຮອບ

ແລະພິກຂຸຜູ້ຢູ່ປະຈຳເງື້ອມພູ ຍັງເຂົ້າຊານຢູ່
ເມື່ອນັ້ນ ກໍຍ່ອມບໍ່ໄດ້ຄວາມຍິນດີທີ່ປະເສີດ
ຍິ່ງກວ່າຄວາມຍິນດີໃນຊານນັ້ນ

[໕໘໓] ເມື່ອໃດ ບັນດິດມີຈິດເບີກບານ ນັ່ງເຂົ້າຊານຢູ່ທີ່ຝັ່ງແມ່ນ້ຳທັງຫຼາຍ
ເຊິ່ງເດຍລະດາດໄປດ້ວຍດອກໂກສຸມ ມີດອກໄມ້ປ່າເປັນຊໍ່ສວຍງາມ
ເມື່ອນັ້ນ ຍ່ອມບໍ່ໄດ້ຄວາມຍິນດີທີ່ປະເສີດ
ຍິ່ງກວ່າຄວາມຍິນດີໃນຊານນັ້ນ

[໕໘໔] ເມື່ອໃດ ມີຝົນຟ້າຮ້ອງໃນເວລາກາງຄືນ
ຝູງສັດທີ່ມີແຂ້ວງາກໍພາກັນຍິນດີໃນປ່າໃຫຍ່ບ່ອນສະງັດ
ແລະພິກຂຸຜູ້ຢູ່ປະຈຳເງື້ອມພູ ເຂົ້າຊານຢູ່
ເມື່ອນັ້ນ ກໍຍ່ອມບໍ່ໄດ້ຄວາມຍິນດີທີ່ປະເສີດ
ຍິ່ງກວ່າຄວາມຍິນດີໃນຊານນັ້ນ

[໕໘໕] ເມື່ອໃດ ພິກຂຸກຳຈັດວິຕົກທັງຫຼາຍຂອງຕົນໄດ້
ເຂົ້າຖ້ຳພາຍໃນພູ ປາສະຈາກຄວາມກະວົນກະວາຍໃຈ
ປາສະຈາກກິເລດທີ່ຕຶງໃຈໂດຍເດັດຂາດ ເຂົ້າຊານຢູ່
ເມື່ອນັ້ນ ຍ່ອມບໍ່ໄດ້ຄວາມຍິນດີທີ່ປະເສີດ
ຍິ່ງກວ່າຄວາມຍິນດີໃນຊານນັ້ນ

[໕໘໖] ເມື່ອໃດ ພິກຂຸມີຄວາມສຸກ
ກຳຈັດກິເລດທີ່ເປັນມົນທິນທີ່ຕຶງໃຈແລະຄວາມໂສກໄດ້
ບໍ່ມີໄລປະຕູຄືອະວິດຊາ ບໍ່ມີປ່າຄືຕັນຫາ
ປາສະຈາກລູກສອນຄືກິເລດ
ທັງເຮັດອາສະວະໃຫ້ສິ້ນໄປໄດ້ໝົດ ເຂົ້າຊານຢູ່
ເມື່ອນັ້ນ ຍ່ອມບໍ່ໄດ້ຄວາມຍິນດີທີ່ປະເສີດ
ຍິ່ງກວ່າຄວາມຍິນດີໃນຊານນັ້ນ

**ນະວະກະນິບາດ ຈົບ**

## ລວມເລື້ອງພຣະເຖຣະທີ່ມີໃນນິບາດນີ້ ຄື

໑. ພຣະພູຕະເຖຣະທີ່ເຫັນທຳໂດຍຖ່ອງແທ້ເປັນຄືນໍແຮດຮູບດຽວ

ແລະໃນນະວະກະນິບາດ ມີ ໙ ຄາຖາ ດັ່ງນີ້ແລ

# ໑໐. ທະສະກະນິບາດ

## ໑. ກາລຸທາຍີເຖຣະຄາຖາ

### ພາສິດຂອງພຣະກາລຸທາຍີເຖຣະ

(ພຣະກາລຸທາຍີເຖຣະໄດ້ກ່າວຄາຖາເຫຼົ່ານີ້ວ່າ)

[໕໒໗] ຂ້າແດ່ພຣະອົງຜູ້ຈະເລີນ ບັດນີ້
ໝູ່ໄມ້ມີດອກແລະໃບສີແດງດັ່ງຖ່ານໄຟ
ຜັດໃບເກົ່າຖິ້ມ ແຕກດອກອອກຜົນ
ໝູ່ໄມ້ເຫຼົ່ານັ້ນ ສະຫວ່າງສະໄຫວດັ່ງແປວເພີງ
ຂ້າແດ່ພຣະມະຫາວີຣະ ຜູ້ມີສ່ວນແຫ່ງອັດຖະຣົດເປັນຕົ້ນ
ເວລານີ້ເປັນເວລາສົມຄວນອະນຸເຄາະໝູ່ພຣະຍາດ

[໕໒໘] ໝູ່ໄມ້ມີດອກບານເດຍລະດາດ ໜ້າອອນຊອນໃຈ
ສົ່ງກິ່ນຫອມຟຸ້ງກະຈາຍໄປທົ່ວທຸກທິດ
ຜັດໃບເກົ່າຖິ້ມ ແຕກດອກອອກຜົນ
ຂ້າແດ່ພຣະອົງຜູ້ແກ່ກ້າ
ເຖິງເວລາທີ່ພຣະອົງຈະສະເດັດຫຼີກໄປຈາກທີ່ນີ້

[໕໒໙] ຂ້າແດ່ພຣະອົງຜູ້ຈະເລີນ ກໍລະດູນີ້ບໍ່ໜາວຫຼາຍ ບໍ່ຮ້ອນຫຼາຍ
ເປັນລະດູທີ່ສະບາຍ ເໝາະແກ່ການເດີນທາງ
ພຣະປະຍູນຍາດທັງຝ່າຍສາກະຍະວົງແລະໂກລິຍະວົງຈະໄດ້ເຝົ້າພຣະອົງ ຜູ້ອວ່າຍໜ້າໄປທາງທິດຕາເວັນອອກເຊິ່ງກຳລັງສະເດັດຂ້າມແມ່ນ້ຳໂຣຫິນີ

[໕໓໐] ຊາວນາໄຖນາກໍດ້ວຍຫວັງຜົນ
ຫວ່ານພືດກໍດ້ວຍຫວັງຜົນ
ພວກພໍ່ຄ້າທີ່ທ່ຽວຫາຊັບ ແລ່ນເຮືອໄປສູ່ສະມຸດ ກໍດ້ວຍຫວັງຜົນ
ຂ້າພຣະອົງຢູ່ໃນບ່ອນນີ້ດ້ວຍຫວັງອັນໃດ
ຂໍຄວາມຫວັງອັນນັ້ນຂອງຂ້າພຣະອົງຈົ່ງສຳເລັດເທີ້ນ

[໕໓໑] ຊາວນາຫວ່ານພືດຕາມລະດູ
ຝົນກໍຕົກຕ້ອງຕາມລະດູ
ຊາວນາໄຖນາຕາມລະດູ
ຣັດຈຶ່ງຈະໄດ້ເຂົ້າເປືອກເປັນປະຈຳ

[໕໓໔] ພວກຜູ້ຂໍທ່ຽວຂໍຢູ່ປະຈຳ ໆ
ພວກທານະບໍດີກໍໃຫ້ຢູ່ປະຈຳ ໆ
ເມື່ອທານະບໍດີໃຫ້ຢູ່ປະຈຳ ໆ ແລ້ວກໍໄປສູ່ສະຫວັນຢູ່ປະຈຳ ໆ

[໕໓໓] ນັກປາດມີປັນຍາກວ້າງຂວາງ ເກີດໃນສະກຸນໃດ
ຍ່ອມເຮັດສະກຸນນັ້ນໃຫ້ບໍລິສຸດສະອາດແນວດຽວ ເຖິງ ໗ ຊົ່ວຄົນ
ຂ້າພຣະອົງເຂົ້າໃຈວ່າ ພຣະອົງເປັນເທບເໜືອກວ່າເທບ
ຍ່ອມຊົງສາມາດເຮັດຜູ້ອື່ນໃຫ້ບໍລິສຸດໄດ້
ຍ້ອນພຣະອົງຊົງອຸບັດໂດຍອະຣິຍະຊາດ ໄດ້ສັດຈະນາມວ່າ ມຸນີ

[໕໓໔] ພຣະຣາດຊະບິດາຂອງພຣະອົງພຣະນາມວ່າ ສຸດໂທທະນະ
ຜູ້ສະແຫວງຄຸນອັນຍິ່ງໃຫຍ່
ສ່ວນພຣະມະເຫສີພຣະນາມວ່າ ມະຫາມາຍາ ເປັນພຸດທະມານດາ
ເຊິ່ງຖະໜອມພຣະອຸທອນພຣະໂພທິສັດມາແລ້ວ
ສະເດັດສະຫວັນຄົດໄປບັນເທີງຢູ່ໃນໂລກສະຫວັນ(ຊັ້ນດຸສິດ)

[໕໓໕] ພຣະນາງມາຍາເທວີໂຄຕະມີພຣະອົງນັ້ນສະຫວັນຄົດ
ຈຸຕິຈາກໂລກນີ້ ພຽບພ້ອມດ້ວຍກາມມະຄຸນທິບ
ມີໝູ່ນາງຟ້າຫ້ອມລ້ອມ ຊົງບັນເທີງຢູ່ດ້ວຍກາມມະຄຸນ ໕
(ພຣະກາລຸທາຍີເຖຣະ ໄດ້ຖວາຍພຣະພອນພຣະເຈົ້າສຸດໂທທະນະມະຫາຣາດວ່າ)

[໕໓໖] ອາດຕະມາພາບເປັນບຸດຂອງພຣະພຸດທະເຈົ້າຜູ້ທີ່ບໍ່ມີໃຜຍໍ່າຍີໄດ້
ມີພຣະຣັດສະໝີແຜ່ຊ່ານຈາກພຣະວໍຣະກາຍ ບໍ່ມີຜູ້ທີ່ຈະປຽບທຽບ ໝັ້ນຄົງ ມະຫາບໍພິດ ພຣະອົງເປັນບິດາຂອງພຣະພຸດທະເຈົ້າຜູ້ເປັນບິດາຂອງ
ອາດຕະມາ ທັງເປັນພຣະເຈົ້າບັນພະບຸລຸດຂອງອາດຕະມາໂດຍທຳ

## ໘. ເອກະວິຫາຣິຍະເຖຣະຄາຖາ

### ພາສິດຂອງພຣະເອກະວິຫາຣິຍະເຖຣະ

(ພຣະເອກະວິຫາຣິຍະເຖຣະໄດ້ກ່າວຄາຖາເຫຼົ່ານີ້ວ່າ)

[໕໓໗] ຖ້າບໍ່ມີຜູ້ອື່ນຢູ່ທາງໜ້າຫຼືທາງຫຼັງ
ເຮົາຢູ່ໃນປ່າຜູ້ດຽວຈະມີຄວາມຜາສຸກຢ່າງຍິ່ງ

[໕໓໘] ຖ້າຈັ່ງຊັ້ນແລ້ວ ເຮົາຄົນດຽວຈະໄປປ່າທີ່ພຣະພຸດທະເຈົ້າຊົງສັນເສີນວ່າ
ມີແຕ່ຄວາມຜາສຸກແກ່ພິກຂຸຜູ້ມັກຢູ່ຜູ້ດຽວ ມີໃຈເດັດດ່ຽວ

[໕໓໙] ເຮົາຜູ້ດຽວມຸ້ງປະໂຫຍດເປັນສຳຄັນ
ຈະຟ້າວເຂົ້າປ່າໃຫຍ່ທີ່ເຮັດປິຕິໃຫ້ເກີດແກ່ຜູ້ພ່ຳເພັງພຽນ
ໜ້າອອນຊອນ ເຊິ່ງຊ້າງຕົກມັນອາໄສຢູ່

[໕໔໐] ຈະອາບນ້ຳທີ່ຊອກພູອັນເຢືອກເຢັນໃນປ່າຮົ່ມ
ມີດອກໄມ້ບານເດຍລະດາດ ຈົງກົມແຕ່ຜູ້ດຽວ

[໕໔໑] ເມື່ອໃດ ເຮົາຈະໄດ້ຢູ່ປ່າໃຫຍ່ທີ່ໜ້າອອນຊອນແຕ່ຜູ້ດຽວ
ບໍ່ມີເພື່ອນ ໄດ້ສຳເລັດກິດ ບໍ່ມີອາສະວະ

[໕໔໒] ຂໍຄວາມປະສົງຂອງເຮົາຜູ້ຕ້ອງການຈະເຮັດແນວນັ້ນຈົ່ງສຳເລັດເທີ້ນ
ເຮົາຈັກເຮັດໃຫ້ສຳເລັດໄດ້ເອງ ຜູ້ອື່ນບໍ່ອາດເຮັດໃຫ້ຜູ້ອື່ນໄດ້ເລີຍ

[໕໔໓] ເຮົານີ້ໃສ່ເກາະຄືຄວາມພຽນຢູ່ ຈະເຂົ້າປ່າໃຫຍ່
ຍັງບໍ່ເຖິງຄວາມສິ້ນອາສະວະ ກໍຈັກບໍ່ອອກຈາກປ່າໃຫຍ່ນັ້ນ

[໕໔໔] ເມື່ອລົມເຢັນພັດເອົາກິ່ນດອກໄມ້ຫອມຟຸ້ງມາ
ເຮົາຈະນັ່ງເທິງຈອມພູທຳລາຍອະວິດຊາ
[໕໔໕] ຈັກໄດ້ຮັບຄວາມສຸກ ອອນຊອນດ້ວຍວິມຸດຕິສຸກ
ທີ່ເງື້ອມພູມີພື້ນເຢັນໃນປ່າ ເຊິ່ງເດຍລະດາດດ້ວຍດອກໂກສຸມ ແນ່ແທ້

[໕໔໖] ເຮົານັ້ນມີຄວາມດຳຣິເຕັມປ່ຽມ ຄືດວງຈັນມື້ເພັງ
ສິ້ນອາສະວະທັງປວງ ບັດນີ້ ການເກີດອີກກໍບໍ່ມີ

## ໓. ມະຫາກັບປິນະເຖຣະຄາຖາ

### ພາສິດຂອງພຣະມະຫາກັບປິນະເຖຣະ

(ພຣະມະຫາກັບປິນະເຖຣະໄດ້ກ່າວຄາຖາເຫຼົ່ານີ້ວ່າ)

[໕໔໗] ຜູ້ໃດຍ່ອມເຫັນປະໂຫຍດທີ່ເກື້ອກູນແລະບໍ່ເກື້ອກູນ
ທັງສອງທີ່ຍັງມາບໍ່ເຖິງນັ້ນໄດ້ກ່ອນ
ຜູ້ທີ່ເປັນສັດຕູຫຼືມິດຂອງຜູ້ນັ້ນ
ຖ້າຫາປ່ອງທາງຢູ່ກໍຍ່ອມບໍ່ເຫັນ

[໕໔໗] ຜູ້ໃດຈະເລີນອານາປານະສະຕິໃຫ້ບໍລິບູນດ້ວຍດີ
ອົບຮົມມາໂດຍລຳດັບ ຕາມທີ່ພຣະພຸດທະເຈົ້າຊົງສະແດງໄວ້
ຜູ້ນັ້ນຍັງໂລກນີ້ໃຫ້ສະຫວ່າງສະໄຫວ
ຄືດວງຈັນພົ້ນຈາກກ້ອນເມືອ

[໕໔໙] ຈິດຂອງເຮົາຜ່ອງແຜ້ວນໍ
ໄດ້ຮັບອົບຮົມດ້ວຍດີຢ່າງບໍ່ມີປະມານ
ເປັນຈິດຮູ້ແຈ້ງແທງຕະຫຼອດແລະປະຄອງໄວ້ດີແລ້ວ
ຍ່ອມສະຫວ່າງສະໄຫວໄປທົ່ວທຸກທິດ

[໕໕໐] ຜູ້ມີປັນຍາເຖິງຈະສິ້ນຊັບ ກໍເປັນຢູ່ໄດ້
ສ່ວນຄົນມີຊັບ ແຕ່ບໍ່ມີປັນຍາ ກໍເປັນຢູ່ບໍ່ໄດ້

[໕໕໑] ປັນຍາເປັນເຄື່ອງຕັດສິນເລື້ອງທີ່ໄດ້ຟັງມາ
ເປັນເຫດຈະເລີນຊື່ສຽງແລະຄວາມສັນເສີນ
ນໍຣະຊົນຜູ້ປະກອບດ້ວຍປັນຍາໃນໂລກນີ້
ແມ່ນໃນເວລາທີ່ຕົນຕົກທຸກ ກໍຍັງປະສົບສຸກໄດ້
[໕໕໒] ທຳນີ້ບໍ່ແມ່ນມີແຕ່ມື້ນີ້
ບໍ່ໜ້າອັດສະຈັນ ທັງບໍ່ແມ່ນບໍ່ເຄີຍມີມາ
ໃນໂລກທີ່ສັດເກີດສັດຕາຍຈະບໍ່ເຄີຍມີໄດ້ແນວໃດ
[໕໕໓] ເມື່ອສັດເກີດມາແລ້ວຈະຕ້ອງຕາຍຕໍ່ຈາກການມີຊີວິດແນ່ແທ້
ສັດທັງຫຼາຍເກີດມາແລ້ວ ໆ ໃນໂລກນີ້ຍ່ອມຕາຍທັງນັ້ນ
ຍ້ອນສັດທັງຫຼາຍມີຄວາມເກີດ ຄວາມຕາຍເປັນທຳມະດາແນວນີ້
[໕໕໔] ການທີ່ຄົນອື່ນ ໆ ຮ້ອງໄຫ້ເຖິງຜູ້ທີ່ຕາຍໄປ
ເພື່ອຕ້ອງການໃຫ້ຜູ້ທີ່ຕາຍໄປນັ້ນມີຊີວິດ
ບໍ່ເປັນປະໂຫຍດສຳລັບຜູ້ທີ່ຕາຍໄປ
ການຮ້ອງໄຫ້ນີ້ນຳຍົດມາໃຫ້ບໍ່ໄດ້
ນຳຄວາມສັນເສີນມາໃຫ້ກໍບໍ່ໄດ້
ທັງສະມະນະພາມກໍບໍ່ສັນເສີນເລີຍ
[໕໕໕] ດວງຕາແລະຮ່າງກາຍຂອງຜູ້ຮ້ອງໄຫ້ຍ່ອມຫາຍ
ຜິວພັນ ກຳລັງ ແລະຄວາມຄິດກໍເສື່ອມ
ພວກຄົນທີ່ເປັນສັດຕູຂອງຜູ້ຮ້ອງໄຫ້ນັ້ນຍ່ອມຍິນດີ
ສ່ວນພວກທີ່ເປັນມິດຂອງເຂົາກໍຍ່ອມບໍ່ມີຄວາມສຸກໄປດ້ວຍ

[໕໕໖] ຍ້ອນແນວນັ້ນແລ ບຸກຄົນເພິ່ງປາຖະໜາທ່ານຜູ້ເປັນນັກປາດ
ແລະທ່ານຜູ້ເປັນພະຫູສູດເຊິ່ງສາມາດເຮັດກິດຂອງຕົນໃຫ້ສຳເລັດໄດ້
ດ້ວຍກຳລັງປັນຍາໃຫ້ຢູ່ໃນສະກຸນ
ຄືຄົນທັງຫຼາຍຂ້າມແມ່ນ້ຳທີ່ເຕັມປ່ຽມໄດ້ດ້ວຍເຮືອ

## ໔. ຈູລະປັນຖະກະເຖຣະຄາຖາ
## ພາສິດຂອງພຣະຈູລະປັນຖະກະເຖຣະ

(ພຣະຈູລະປັນຖະກະເຖຣະໄດ້ກ່າວຄາຖາເຫຼົ່ານີ້ວ່າ)

[໕໕໗] ແຕ່ກ່ອນ ເຮົາໄດ້ມີຍານຄະຕິເກີດຊ້າ ເຮົາຈຶ່ງຖືກດູໝິ່ນ
ທັງອ້າຍ ກໍໄດ້ຂັບໄລ່ເຮົາວ່າ ເຈົ້າຈົ່ງກັບໄປເຮືອນດຽວນີ້

[໕໕໘] ເຮົານັ້ນຖືກຂັບໄລ່ແລ້ວ ຍັງມີຄວາມເຍື່ອໃຍໃນພຣະສາດສະໜາຢູ່
ຈຶ່ງໄດ້ໄປຢືນເສຍໃຈໃກ້ຊຸ້ມປະຕູສັງຄາຣາມນັ້ນ

[໕໕໙] ພຣະຜູ້ມີພຣະພາກເຈົ້າໄດ້ສະເດັດມາ ໃນບ່ອນນັ້ນ
ຊົງລູບຫົວເຮົາ ຊົງຈັບແຂນເຮົາ ພາເຂົ້າໄປສູ່ສັງຄາຣາມ

[໕໖໐] ພຣະສາດສະດາຊົງອະນຸເຄາະເຮົາ
ໄດ້ຊົງປະທານຜ້າເຊັດພຣະບາດ ດ້ວຍຮັບສັ່ງວ່າ
ທ່ານຈົ່ງອະທິຖານຜ້າທີ່ສະອາດນີ້ໃຫ້ໝັ້ນຄົງ ຢູ່ບ່ອນທີ່ສົມຄວນ

[໕໖໑] ເຮົາຟັງພຣະດຳຣັດຂອງພຣະອົງ
ຍັງຍິນດີຢູ່ໃນພຣະສາດສະໜາ
ໄດ້ເຮັດສະມາທິໃຫ້ເກີດເພື່ອບັນລຸປະໂຫຍດສູງສຸດ

[໕໖໔] ເຮົາຮູ້ເຖິງຂັນທີ່ອາໄສຢູ່ມາກ່ອນ
ຊຳຣະທິບພະຈັກຂຸໃຫ້ມົດຈົດແລ້ວ
ເຮົາບັນລຸວິດຊາ ໓
ໄດ້ເຮັດຕາມຄຳສັ່ງສອນຂອງພຣະພຸດທະເຈົ້າແລ້ວ

[໕໖໓] ປັນຖະກະເຖຣະເນຣະມິດຕົນໜຶ່ງພັນ
ນັ່ງໃນອຳພະວັນທີ່ໜ້າອອນຊອນ
ຈົນເຖິງເວລາເຂົາມານິມົນ

[໔໙໔] ລຳດັບນັ້ນ ພຣະສາດສະດາຊົງໃຊ້ທູດ
ໃຫ້ໄປບອກເວລາສັນອາຫານແກ່ເຮົາ
ເມື່ອທູດບອກເວລາສັນແລ້ວ
ເຮົາກໍໄດ້ເຫາະໄປເຝົ້າ

[໔໙໕] ຖວາຍບັງຄົມພຣະບາດທັງສອງພຣະສາດສະດາແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ
ບັດນັ້ນ ພຣະສາດສະດາຊົງຮັບຮອງເຮົາຜູ້ຖວາຍບັງຄົມແລ້ວນັ່ງຢູ່

[໔໙໖] ປັນຖະກະເຖຣະເປັນຜູ້ຄວນບູຊາຂອງຊາວໂລກທັງມວນ
ເປັນຜູ້ຄວນຮັບຂອງທີ່ເຂົານຳມາບູຊາ
ເປັນເນື້ອນາບຸນຂອງໝູ່ມະນຸດ ໄດ້ຮັບທັກຂິນາແລ້ວ

# ໕. ກັບປະເຖຣະຄາຖາ

## ພາສິດຂອງພຣະກັບປະເຖຣະ

(ພຣະສາດສະດາຕັດອະສຸພະກະຖາສອນພຣະເຈົ້າກັບປະນັ້ນດ້ວຍພຣະຄາຖາເຫຼົ່ານີ້ວ່າ)

[໔໙໗] ຮ່າງກາຍນີ້ເຕັມໄປດ້ວຍຂອງສົກກະປົກແລະມົນທິນຕ່າງ ໆ
ມີຂຸມຄູດໃຫຍ່ເປັນທີ່ເກີດ ເປັນຄືນ້ຳສ້າງສົກກະປົກທີ່ມີມາດົນ
ເປັນຄືຝີໃຫຍ່ ເປັນຄືບາດໃຫຍ່

[໔໙໘] ເປັນກາຍເຕັມໄປດ້ວຍໜອງແລະເລືອດ ເຕັມໄປດ້ວຍຂຸມຄູດ
ມີນ້ຳໄຫຼອອກຢູ່ປະຈຳ ຫຼັ່ງຂອງເນົ່າເສຍອອກຢູ່ປະຈຳ
[໔໙໙] ມີເສັ້ນເອັນໃຫຍ່ ໖໐ ເສັ້ນຮ້ອຍຮັດໄວ້
ມີເຄື່ອງສາບທາຄືຊີ້ນສາບທາໄວ້ ມີເສື້ອຄືໜັງຫຸ້ມຫໍ່ໄວ້
ເປັນກາຍເປື່ອຍເນົ່າ ບໍ່ມີປະໂຫຍດ

[໕໐໐] ເຊື່ອມຕໍ່ໄວ້ດ້ວຍໂຄງກະດູກ
ກ່ຽວຮ້ອຍໄວ້ດ້ວຍດ້າຍຄືເສັ້ນເອັນ
ຜັດປ່ຽນອິລິຍາບົດໄດ້ ຍ້ອນມີມະຫາພູຕະຮູບ ໔
ຊີວິຕິນຊີ ລົມອັດສາສະ ປັດສາສະ[១]
ແລະວິນຍານເປັນຕົ້ນກ່ຽວເນື່ອງກັນ

[໔໗໑] ນໍຣະຊົນຜູ້ມີຈິດເປັນໄປຕາມຄວາມປາຖະໜາ
ດໍາເນີນໄປສູ່ຄວາມຕາຍຢ່າງແນ່ນອນ
ຢູ່ໃກ້ມັດຈຸຣາດ ລະຖິ້ມຮ່າງກາຍໄວ້ໃນໂລກນີ້ເອງ

[໔໗໔] ຮ່າງກາຍທີ່ຖືກອະວິດຊາຫຸ້ມຫໍ່ໄວ້
ຖືກກິເລດເຄື່ອງຮ້ອຍຮັດ ໔ ຢ່າງຮ້ອຍຮັດໄວ້
ເປັນກາຍຈົມລົງໃນແມ່ນ້ຳຄືກິເລດ
ຖືກຕາໜ່າງຄືອະນຸໄສກິເລດປົກຄຸມໄວ້

[໔໗໓] ປະກອບດ້ວຍນີວອນ ໕ ພຽບພ້ອມດ້ວຍວິຕົກ
ຖືກຮາກເຫງົ້າແຫ່ງພົບຄືຕັນຫາຮ້ອຍຮັດ
ຖືກເຄື່ອງປິດບັງຄືໂມຫະປິດບັງໄວ້

[໔໗໔] ຮ່າງກາຍນີ້ຖືກເຄື່ອງໝຸນຄືກໍາໃຫ້ໝຸນໄປ ຈຶ່ງໝຸນໄປແນວນີ້
ສົມບັດ(ທີ່ມີຢູ່ໃນຮ່າງກາຍນີ້)ມີວິບັດເປັນບ່ອນສຸດ
ຍ່ອມມີຄວາມພັດພາກກັນເປັນທໍາມະດາ

[໔໗໕] ເຫຼົ່າປຸຖຸຊົນຜູ້ໂງ່ຈ້າເຊິ່ງຢຶດຖືຮ່າງກາຍນີ້ວ່າເປັນຂອງເຮົາ
ຍ່ອມເຮັດສັງສາຣະວັດທີ່ເປັນຕາຢ້ານໃຫ້ຈະເລີນ ທັງຢຶດພົບໃໝ່ໄວ້

[໔໗໖] ເຫຼົ່າກຸນລະບຸດຜູ້ເປັນບັນດິດເຊິ່ງລະຮ່າງກາຍທີ່ໜ້າລັງກຽດນີ້
ຄາຍອະວິດຊາ ແລະພະວະຕັນຫາເຊິ່ງເປັນຮາກເຫງົ້າແຫ່ງພົບໄດ້ແລ້ວ
ຈັກປະຣິນິບພານຢ່າງບໍ່ມີອາສະວະ
ຄືຄົນທີ່ຕ້ອງການຄວາມສຸກຢາກມີຊີວິດຢູ່
ເຫັນອະສໍຣະພິດໂຕເປື້ອນຄູດແລ້ວກໍຫຼີກໜີໄປສັນນັ້ນ

## ໖. ວັງຄັນຕະປຸດຕະອຸປະເສນະເຖຣະຄາຖາ

### ພາສິດຂອງພຣະວັງຄັນຕະປຸດຕະອຸປະເສນະເຖຣະ

(ພຣະວັງຄັນຕະປຸດຕະອຸປະເສນະເຖຣະໄດ້ກ່າວຄາຖາເຫຼົ່ານີ້ວ່າ)

[໔໗໗] ພິກຂຸເພິ່ງຢູ່ເສນາສະນະອັນສະຫງັດ ປາສະຈາກສຽງອື້ອຶງ
ທີ່ສັດຮ້າຍອາໄສຢູ່ ຍ້ອນການຫຼີບຫຼີກເປັນເຫດ

[໕໗໘] ເພິ່ງເກັບຜ້າຈາກກອງຂີ້ເຫຍື້ອ ຈາກປ່າຊ້າ
ແລະຮ່ອມນ້ອຍ ຮ່ອມໃຫຍ່ນັ້ນ
ເຮັດເປັນຜ້ານຸ່ງ ຜ້າຫົ່ມ ແລ້ວໃຊ້ຈີວອນທີ່ເສົ້າໝອງ

[໕໗໙] ພິກຂຸເພິ່ງຄຸ້ມຄອງທະວານ
ສັງລວມລະວັງເຮັດໃຈໃຫ້ເຄົາລົບເອື້ອເຟື້ອແລ້ວ
ທ່ຽວບິນທະບາດຕາມລຳດັບສະກຸນ ຕາມລຳດັບຮ່ອມ

[໕໘໐] ເພິ່ງຍິນດີດ້ວຍຂອງຕາມທີ່ໄດ້ ເຖິງຈະເປັນຂອງເສົ້າໝອງ
ແລະບໍ່ຄວນປາຖະໜາຣົດແນວອື່ນຈາກຣົດຕາມທີ່ໄດ້ມາໃຫ້ຫຼາຍ
ສຳລັບຜູ້ທີ່ຍັງຕິດໃນຣົດ ໃຈຍ່ອມບໍ່ຍິນດີໃນຊານ

[໕໘໑] ພິກຂຸເພິ່ງເປັນຜູ້ມີຄວາມປາຖະໜາໜ້ອຍ ສັນໂດດ ມັກສະຫງັດ
ເປັນມຸນີ ແລະບໍ່ຢູ່ຄຸກຄີດ້ວຍຄະລືຫັດແລະບັນພະຊິດທັງສອງ

[໕໘໒] ພິກຂຸຜູ້ເປັນບັນດິດຄວນສະແດງຕົນໃຫ້ເປັນຄືຄົນໂງ່ແລະຄົນກືກ
ບໍ່ຄວນເວົ້າຫຼາຍໃນທ່າມກາງສົງ

[໕໘໓] ທ່ານບໍ່ເພິ່ງວ່າຮ້າຍໃຜ ເພິ່ງເວັ້ນການກະທົບ
ຄວນສັງລວມໃນພຣະປາຕິໂມກ ແລະຮູ້ຈັກປະມານໃນການຂົບສັນ

[໕໘໔] ເປັນຜູ້ສະຫຼາດໃນການເກີດຂຶ້ນແຫ່ງຈິດທີ່ກຳນົດນິມິດໄວ້ດີແລ້ວ
ປະກອບສະມະຖະແລະວິປັດສະນາຕາມການອັນສົມຄວນເນືອງ ໆ

[໕໘໕] ພິກຂຸຜູ້ເປັນບັນດິດເພິ່ງເປັນຜູ້ເຖິງພ້ອມດ້ວຍຄວາມພຽນຢູ່ປະຈຳ
ປະກອບພາວະນາທຸກເມື່ອ
ຫາກຍັງບໍ່ເຖິງບ່ອນສຸດທຸກບໍ່ເພິ່ງເຖິງຄວາມວາງໃຈ

[໕໘໖] ອາສະວະທັງປວງຂອງພິກຂຸຜູ້ປາຖະໜາຄວາມບໍລິສຸດເປັນຢູ່ຢ່າງນີ້ ຍ່ອມສິ້ນໄປ ແລະທ່ານກໍຍ່ອມບັນລຸນິບພານ

## ໗. ໂຄຕະມະເຖຣະຄາຖາ

## ພາສິດຂອງພຣະໂຄດົມເຖຣະ

(ພຣະໂຄດົມເຖຣະໄດ້ກ່າວຄາຖາເຫຼົ່ານີ້ວ່າ)

[໕໘໗] ບຸກຄົນເພິ່ງຮູ້ຈັກປະໂຫຍດຂອງຕົນ ໑ ເພິ່ງກວດເບິ່ງປາພົດ[໑] ໑
ເພິ່ງກວດກາສິ່ງທີ່ສົມຄວນໃນສາດສະໜານີ້
ຂອງກຸນລະບຸດຜູ້ເຂົ້າເຖິງຄວາມເປັນສະມະນະ ໑

[໔໗໘] ມິດດີ ໑ ການສະມາທານສິກຂາໃຫ້ບໍລິບູນ ໑
ການເຊື່ອຟັງຄູທັງຫຼາຍ ໑ ນີ້ເປັນການສົມຄວນແກ່ສະມະນະໃນສາດສະໜານີ້

[໔໗໙] ຄວາມເຄົາລົບໃນພຣະພຸດທະເຈົ້າ ໑
ຄວາມນອບນ້ອມໃນພຣະທຳຕາມຄວາມເປັນຈິງ ໑
ການກະທຳຄວາມຢຳເກງໃນພຣະສົງ ໑
ນີ້ເປັນການສົມຄວນແກ່ສະມະນະ

[໔໙໐] ພິກຂຸຜູ້ປະກອບໃນອາຈາຣະແລະໂຄຈອນ ໑
ຜູ້ຊຳຣະອາຊີບໃຫ້ບໍລິສຸດ ເຊິ່ງທ່ານຜູ້ຮູ້ບໍ່ຕຳໜິຕິຕຽນ ໑
ການຕັ້ງຈິດໄວ້ຖືກຕ້ອງ ໑ ນີ້ເປັນການສົມຄວນແກ່ສະມະນະ

[໔໙໑] ຈາຣິຕະສີນ ໑ ວາຣິຕະສີນ ໑
ການຜັດປ່ຽນອິລິຍາບົດທີ່ໜ້າເຫຼື້ອມໃສ ໑
ການປະກອບເນືອງ ໆ ໃນອະທິຈິດ ໑
ນີ້ເປັນການສົມຄວນແກ່ສະມະນະ

[໔໙໒] ເສນາສະນະປ່າ ໑ ບ່ອນສະງັດ ໑ ບ່ອນງຽບ ໑ ບ່ອນມຸນີຢູ່ອາໄສ ໑
ນີ້ເປັນການສົມຄວນແກ່ສະມະນະ

[໔໙໓] ຈະຕຸປາຣິສຸດທິສີນ ໑ ພາຫຸສັດຈະ ໑
ການພິຈາລະນາຄົ້ນຄວ້າທຳຕາມຄວາມເປັນຈິງ ໑
ການຮູ້ແຈ້ງອະຣິຍະສັດ ໑ ນີ້ເປັນການສົມຄວນແກ່ສະມະນະ

[໔໙໔] ຂໍ້ທີ່ບຸກຄົນເພິ່ງຈະເລີນອະນິດຈະສັນຍາວ່າ ສັງຂານທັງປວງບໍ່ທ່ຽງ ໑
ຈະເລີນອະນັດຕະສັນຍາວ່າ ທຳທັງປວງເປັນອະນັດຕາ ໑
ຈະເລີນອະສຸພະສັນຍາ ໑ ຈະເລີນອະນະພິຣະຕິສັນຍາໃນໂລກ ໑
ນີ້ເປັນການສົມຄວນແກ່ສະມະນະ

[໔໙໕] ຂໍ້ທີ່ບຸກຄົນເພິ່ງຈະເລີນໂພດຊົງ ໑ ອິດທິບາດ ໑
ອິນຊີ ໑ ພະລະ ໑ ອະຣິຍັດຖັງຄິກະມັກ ໑
ນີ້ເປັນການສົມຄວນແກ່ສະມະນະ

[໔໙໖] ພຣະມຸນີເພິ່ງລະຕັນຫາ ໑
ທຳລາຍອາສະວະພ້ອມທັງຮາກເຫງົ້າ ໑

ເພິ່ງຢູ່ຢ່າງຜູ້ມີຈິດລຸດພົ້ນ ໑
ນີ້ເປັນການສົມຄວນແກ່ສະມະນະ

**ທະສະກະນິບາດ ຈົບ**

## ລວມເລື່ອງພຣະເຖຣະທີ່ມີໃນນິບາດນີ້ ຄື

໑. ພຣະກາລຸທາຍີເຖຣະ
໒. ພຣະມະຫາກັບປິນະເຖຣະ
໓. ພຣະກັບປະເຖຣະ
໗. ພຣະໂຄຕະມະເຖຣະ
໔. ພຣະເອກະວິຫາຣິຍະເຖຣະ
໕. ພຣະຈູລະປັນຖະກະເຖຣະ
໖. ພຣະວັງຄັນຕະປຸດຕະອຸປະເສນະເຖຣະ

ໃນທະສະກະນິບາດນີ້ ມີພຣະເຖຣະ ໗ ອົງນີ້

ແລະມີ ໗໐ ຄາຖາ ດັ່ງນີ້ແລ

# ໑໑. ເອກາທະສະກະນິບາດ

## ໑. ສັງກິດຈະເຖຣະຄາຖາ

### ພາສິດຂອງພຣະສັງກິດຈະເຖຣະ

(ອຸປາສົກຄົນໜຶ່ງຕ້ອງການບຳລຸງສັງກິດຈະສາມະເນນ ຈຶ່ງນິມົນສາມະເນນໃຫ້ຢູ່ທີ່ໃກ້ດ້ວຍຄາຖາວ່າ)

[໕໙໗] ລູກສາມະເນນ ປ່າຈະມີປະໂຫຍດອັນໃດສຳລັບທ່ານ
ໃນລະດູຝົນ ພູຊື່ອຸດຊູຫານະນັ້ນເອງບໍ່ເປັນທີ່ສະບາຍ
ລົມຫົວກຸດກໍພັດມາປະຈຳ ທ່ານຈະເພິ່ງພໍໃຈບໍ
ຍ້ອນຄວາມສະຫງັດເປັນທີ່ຕ້ອງການຂອງຜູ້ຈະເລີນຊານ
(ພຣະສັງກິດຈະເຖຣະໄດ້ກ່າວຄາຖາເຫຼົ່ານີ້ວ່າ)

[໕໙໘] ໃນລະດູຝົນ ລົມຫົວກຸດ ຍ່ອມພັດພາກ້ອນເຝື້ອໝອກໄປໄດ້ສັນໃດ
ສັນຍາທີ່ປະກອບດ້ວຍວິເວກກໍຄືກັນສັນນັ້ນ
ຍ່ອມດຶງຈິດຂອງອາດຕະມາໄປສູ່ທີ່ວິເວກ

[໕໙໙] ກາຍະຄະຕາສະຕິກຳມະຖານທີ່ປະກອບດ້ວຍຄວາມຄາຍກຳໜັດ
ໃນຮ່າງກາຍ ເກີດຂຶ້ນແກ່ອາດຕະມາທັນທີ
ຄືກາດຳເກີດຈາກໜ່ອຍໄຂ່ ທ່ຽວອາໄສຢູ່ໃນປ່າຊ້າ

[໖໐໐] ພິກຂຸຜູ້ບໍ່ມີຄົນອື່ນຄອຍດູແລຮັກສາ
ແລະບໍ່ຄອຍດູແລຮັກສາຄົນອື່ນ ນັ້ນແລ
ບໍ່ມີຄວາມເຍື່ອໃຍໃນກາມທັງຫຼາຍ ຍ່ອມຢູ່ເປັນສຸກ

[໖໐໑] ພູສີລາອັນກວ້າງໃຫຍ່ໄພສານມີນ້ຳໄຫຼໃສສະອາດ
ມີຝູງຄ່າງແລະຝູງໂຕຟານຈຳນວນຫຼາຍ
ເດຍລະດາດໄປດ້ວຍນ້ຳແລະສາຫຣ່າຍເຫຼົ່ານັ້ນ
ຍ່ອມເຮັດໃຫ້ອາດຕະມາອອນຊອນໃຈຍິ່ງ

[໖໐໒] ໃນເສນາສະນະບ່ອນສະງັດຄືປ່າ ຮ່ອມພູ ແລະຖ້ຳ
ທີ່ສັດຮ້າຍອາໄສຢູ່ ອາດຕະມາເຄີຍຢູ່ມາແລ້ວ

[໖໐໓] ອາດຕະມາບໍ່ເຄີຍດຳຣິເຖິງສິ່ງທີ່ບໍ່ດີ ປະກອບດ້ວຍໂທດເລີຍວ່າ
ຂໍສັດເຫຼົ່ານີ້ຈົ່ງຖືກບຽດບຽນ ຈົ່ງຖືກຂ້າ ຈົ່ງປະສົບທຸກ

[໖໐໔] ອາດຕະມາໄດ້ປົນນິບັດພຣະສາດສະດາ
ໄດ້ເຮັດຕາມຄຳສັ່ງສອນຂອງພຣະພຸດທະເຈົ້າແລ້ວ
ປົງພາຣະທີ່ໜັກໄດ້
ຖອນຕັນຫາທີ່ນຳໄປສູ່ພົບໄດ້ຂາດແລ້ວ

[໖໐໕] ອາດຕະມາອອກຈາກເຮືອນບວດເປັນບັນພະຊິດເພື່ອປະໂຫຍດໃດ
ປະໂຫຍດນັ້ນອັນເປັນທີ່ສິ້ນສຸດໄປແຫ່ງສັງໂຍດທັງປວງ
ອາດຕະມາກໍໄດ້ບັນລຸແລ້ວ

[໖໐໖] ອາດຕະມາບໍ່ຍາກຕາຍ
ບໍ່ຍາກເປັນຢູ່
ແຕ່ອາດຕະມາຄອຍຖ້າເວລາຢູ່
ຄືລູກຈ້າງເຮັດວຽກງານຖ້າຄ່າຈ້າງ

[໖໐໗] ອາດຕະມາບໍ່ຍາກຕາຍ
ບໍ່ຍາກເປັນຢູ່

ແຕ່ອາດຕະມາມີສະຕິສຳປະຊັນຍະຢູ່ສະເພາະໜ້າ
ຖ້າເວລາອັນຄວນ

**ເອກາທະສະກະນິບາດ ຈົບ**

## ລວມເລື້ອງພຣະເຖຣະທີ່ມີໃນນິບາດນີ້ ຄື

ລວມພຣະສັງກິດຈະເຖຣະຜູ້ເຮັດກິດສຳເລັດແລ້ວ
ບໍ່ມີອາສະວະອີງດຽວທີ່ນັ້ນ ແລະໃນເອກາທະສະກະນິບາດ ມີ ໑໑ ຄາຖາ ດັ່ງນີ້ແລ

# ໑໔. ທະວາທະສະກະນິບາດ

## ໑. ສີລະວະເຖຣະຄາຖາ

### ພາສິດຂອງພຣະສີລະວະເຖຣະ

(ພຣະສີລະວະເຖຣະສະແດງທຳດ້ວຍຄາຖາເຫຼົ່ານີ້ວ່າ)

[໖໐໘] ກຸນລະບຸດໃນສັດໂລກນີ້ຜູ້ຕ້ອງການປະໂຫຍດ
ເພິ່ງສຶກສາສິນນັ້ນແລໃຫ້ເປັນອັນສຶກສາດີແລ້ວໃນໂລກນີ້
ຍ້ອນສິນທີ່ຮັກສາແລ້ວ ຍ່ອມນຳສົມບັດທຸກປະເພດມາໃຫ້ໄດ້

[໖໐໙] ຜູ້ມີປັນຍາເມື່ອປາຖະໜາຄວາມສຸກ ໓ ຢ່າງ
ຄື ການສັນເສີນ ໑ ການໄດ້ຄວາມດີໃຈ ໑
ການຕາຍໄປແລ້ວບັນເທີງໃນສະຫວັນ ໑
ຄວນຮັກສາສິນ

[໖໑໐] ຍ້ອນຜູ້ມີສິນ ມີຄວາມສັງລວມ ຍ່ອມໄດ້ມິດຫຼາຍ
ສ່ວນຜູ້ທຸສິນ ປະພຶດແຕ່ຄວາມຊົ່ວ ຍ່ອມແຕກຈາກມິດ

[໖໑໑] ນໍຣະຊົນຜູ້ທຸສິນຍ່ອມໄດ້ຮັບການຕຳໜິແລະຕິຕຽນ
ນໍຣະຊົນຜູ້ມີສິນຍ່ອມໄດ້ຮັບຄວາມຍ້ອງຍໍຊົມເຊີຍແລະສັນເສີນທຸກເມື່ອ

[໖໑໒] ສິນເປັນເບື້ອງຕົ້ນ ເປັນບ່ອນຕັ້ງ
ເປັນບໍ່ເກີດແຫ່ງຄຸນຄວາມດີທັງຫຼາຍ

ເປັນປະທານແຫ່ງທຳທັງປວງ
ຍ້ອນແນວນັ້ນ ເພິ່ງຊຳຣະສີນໃຫ້ບໍລິສຸດ

[໖໑໓] ສັງວອນສີນ ເປັນເຄື່ອງກັ້ນທຸດຈະຣິດ ເຮັດຈິດໃຫ້ແຈ່ມໃສ
ແລະເປັນທ່າສຳລັບຢັ່ງລົງມະຫາສະມຸດຄືນິບພານ
ຂອງພຣະພຸດທະເຈົ້າທຸກພຣະອົງ
ຍ້ອນແນວນັ້ນ ຄວນຊຳຣະສີນໃຫ້ບໍລິສຸດ

[໖໑໔] ສີນເປັນກຳລັງຫາສິ່ງປຽບທຽບບໍ່ໄດ້
ເປັນອາວຸດຊັ້ນເລີດ ເປັນອາພອນອັນປະເສີດ
ເປັນເກາະບັງຢ່າງໜ້າອັດສະຈັນ

[໖໑໕] ສີນເປັນຂົວອັນມີພະລັງຫຼາຍ ມີກິ່ນຫອມຢ່າງຍິ່ງ
ເປັນເຄື່ອງລູບທາອັນປະເສີດ
ເຊິ່ງເປັນເຫດໃຫ້ຜູ້ມີສີນ ມີຊື່ສຽງ ຊ່າລືໄປທົ່ວທຸກທິດ

[໖໑໖] ສີນເປັນກຳລັງທີ່ດີເລີດ ເປັນສະບຽງເດີນທາງຊັ້ນເລີດ
ເປັນຍານພາຫະນະຊັ້ນປະເສີດ
ເຊິ່ງເປັນເຫດໃຫ້ຜູ້ມີສີນໄປໄດ້ທົ່ວທຸກທິດ

[໖໑໗] ຄົນພານມີໃຈບໍ່ຕັ້ງໝັ້ນໃນສີນ ຍ່ອມໄດ້ຮັບການຕິສິນນິນທາໃນໂລກນີ້
ແລະຕາຍໄປແລ້ວ ຍ່ອມໄດ້ຮັບທຸກໂທມະນັດໃນອະບາຍພູມ
ຍ່ອມໄດ້ຮັບທຸກໂທມະນັດໃນທີ່ທົ່ວໄປ

[໖໑໘] ທີຣະຊົນຕັ້ງໝັ້ນດີໃນສີນ ຍ່ອມໄດ້ຮັບຊື່ສຽງໃນໂລກນີ້
ແລະຕາຍໄປແລ້ວ ຍ່ອມໄດ້ຮັບສຸກໂສມະນັດໃນສະຫວັນ
ຍ່ອມໄດ້ຮັບສຸກໂສມະນັດໃນທີ່ທົ່ວໄປ

[໖໑໙] ສີນທໍ່ນັ້ນເປັນເລີດໃນໂລກນີ້
ສ່ວນຜູ້ມີປັນຍາເປັນຜູ້ສູງສຸດທັງໃນໝູ່ມະນຸດແລະໝູ່ເທວະດາ
ໄຊຊະນະກໍຍ້ອນສີນແລະປັນຍາ
ພາສິດຂອງພຣະສຸນິຕະເຖຣະ

# ສຸນີຕະເຖຣະຄາຖາ

## ພາສິດຂອງພຣະສຸນີຕະເຖຣະ

(ພຣະສຸນີຕະເຖຣະໄດ້ບັນລືສີຫະນາດດ້ວຍຄາຖາເຫຼົ່ານີ້ວ່າ)

[໖໒໐] ເຮົາເກີດມາໃນຕະກູນຕ່ຳ ແລະຂັດສົນ
ມີຂອງກິນໜ້ອຍ ມີວຽກງານຕ່ຳ
ໄດ້ເປັນຄົນເກັບດອກໄມ້ທີ່ຫ່ຽວແຫ້ງໄປຖິ້ມ

[໖໒໑] ເຮົາຖືກຄົນທັງຫຼາຍກຽດຊັງ ດູໝິ່ນ ຂົ່ມຂູ່
ໄດ້ຖ່ອມຕົນ ໄຫວ້ໝູ່ຊົນທັງຫຼາຍ

[໖໒໒] ຕໍ່ມາ ເຮົາໄດ້ພົບພຣະສຳມາສຳພຸດທະເຈົ້າ
ຊຶ່ງມີຄວາມພຽນຫຼາຍເຊິ່ງມີພິກຂຸສົງຫ້ອມລ້ອມ
ກຳລັງສະເດັດເຂົ້າໄປສູ່ພຣະນະຄອນອັນອຸດົມຂອງຊາວມະຄົດ

[໖໒໓] ຈຶ່ງວາງຫາບລົງແລ້ວ
ເຂົ້າໄປຖວາຍບັງຄົມພຣະອົງເຊິ່ງເປັນບຸກຄົນຜູ້ສູງສຸດ
ໄດ້ປະທັບຢືນຢູ່ເພື່ອອະນຸເຄາະເຮົາ
[໖໒໔] ຄັ້ງນັ້ນ ເຮົາໄດ້ຖວາຍບັງຄົມພຣະບາດທັງສອງພຣະສາດສະດາ
ແລ້ວຢືນຢູ່ບ່ອນທີ່ສົມຄວນ
ຈຶ່ງໄດ້ທູນຂໍບັນພະຊາກັບພຣະອົງຜູ້ສູງສຸດກວ່າສັບພະສັດ

[໖໒໕] ລຳດັບນັ້ນ ພຣະສາດສະດາຜູ້ຊົງມີພຣະກະລຸນາ
ອະນຸເຄາະສັດໂລກທັງມວນ ໄດ້ຕັດກັບເຮົາວ່າ
ທ່ານເປັນພິກຂຸມາເທີ້ນ
ພຣະວາຈານັ້ນໄດ້ເປັນການອຸປະສົມບົດຂອງເຮົາ

[໖໒໖] ເຮົານັ້ນຢູ່ໃນປ່າແຕ່ຜູ້ດຽວ ບໍ່ຂີ້ຄ້ານ
ໄດ້ເຮັດຕາມພຣະໂອວາດພຣະສາດສະດາຜູ້ຊະນະມານຊົງສັ່ງສອນເຮົາມາ

[໖໒໗] ໃນຣາຕີປະຖົມມະຍາມ ເຮົາຣະນຶກຊາດກ່ອນໄດ້
ໃນມັດຊິມະຍາມ ໄດ້ຊຳຣະທິບພະຈັກຂຸໃຫ້ສະອາດແລ້ວ
ໃນປັດສິມມະຍາມ ໄດ້ທຳລາຍກອງແຫ່ງຄວາມມືດຄືອະວິດຊາແລ້ວ

[໓໔໗] ຕໍ່ເມື່ອຣາຕີສິ້ນໄປ
ດວງອາທິດຂຶ້ນໄປຈົນຕົກ
ພຣະອິນແລະທ້າວມະຫາພົມພາກັນມາປະນົມອັນຊະລີ
ນອບນ້ອມເຮົາພ້ອມກັບກ່າວວ່າ

[໓໔໘] ຂ້າແດ່ທ່ານຜູ້ເປັນບຸຣຸດອາຊາໄນ
ຂໍຄວາມນອບນ້ອມຈົ່ງມີແດ່ທ່ານ
ຂ້າແດ່ທ່ານຜູ້ເປັນບຸຣຸດສູງສຸດ
ຂໍຄວາມນອບນ້ອມຈົ່ງມີແດ່ທ່ານ
ທ່ານຜູ້ນິຣະທຸກ ທ່ານສິ້ນອາສະວະແລ້ວເປັນຜູ້ຄວນແກ່ທັກຂິນາ

[໓໕໐] ລຳດັບນັ້ນ ພຣະສາດສະດາໄດ້ຊົງເຫັນເຊິ່ງໝູ່ເທວະດາຫ້ອມລ້ອມຢູ່
ຈຶ່ງຊົງແຍ້ມ ແລ້ວໄດ້ຕັດເນື້ອຄວາມນີ້ວ່າ

[໓໕໑] ບຸກຄົນຊື່ວ່າເປັນພານຍ້ອນຄຸນນະທຳນີ້ ຄື
ຕະບະ ພົມມະຈັນ ຄວາມສັງລວມ ແລະຄວາມເຝິກຝົນ
ຕະບະເປັນຕົ້ນນີ້ຈັດເປັນພານຊັ້ນສູງສຸດ

**ທະວາທະສະກະນິບາດ ຈົບ**

## ລວມເລື້ອງພຣະເຖຣະທີ່ມີໃນນິບາດນີ້ ໒ ອົງ ຄື

ພຣະເຖຣະ ໒ ອົງນີ້ມີລິດຫຼາຍ ຄື

໑. ພຣະສີລະວະເຖຣະ ໒. ພຣະສຸນີຕະເຖຣະ

ໃນທະວາທະສະກະນິບາດມີ ໒໔ ຄາຖາ ດັ່ງນີ້ແລ

# ໑໓. ເຕຣະສະກະນິບາດ

## ໑. ໂສນະໂກລິວິສະເຖຣະຄາຖາ

### ພາສິດຂອງພຣະໂສນະໂກລິວິສະເຖຣະ

(ພຣະໂສນະໂກລິວິສະເຖຣະໄດ້ກ່າວຄາຖາເຫຼົ່ານີ້ວ່າ)

[໖໓໒] ຜູ້ໃດເປັນຄະຫະບໍດີທີ່ຍິ່ງໃຫຍ່
ສົມຄວາມປາຖະໜາໃນຣັດຂອງພຣະເຈົ້າອັງຄະ
ມື້ນີ້ ຜູ້ນັ້ນຊື່ວ່າໂສນະ
ເປັນຜູ້ຍັງມທີ່ສຸດໃນທຳທັງຫຼາຍ ໄດ້ເຖິງບ່ອນສຸດທຸກ

[໖໓໓] ພິກຂຸເພິ່ງຕັດສັງໂຍດເບື້ອງຕ່ຳ ໕ ເພິ່ງລະສັງໂຍດເບື້ອງສູງ ໕
ແລະເພິ່ງຈະເລີນອິນຊີ ໕ ໃຫ້ຍິ່ງ
ພິກຂຸຜູ້ລ່ວງທຳເປັນເຄື່ອງຂ້ອງໄດ້ທັງ ໕
ທ່ານຮຽກວ່າ ຂ້າມໂອຄະໄດ້ແລ້ວ

[໖໓໔] ສຳລັບພິກຂຸຜູ້ຜະໝາດ ມີໃຈພອງຄືຕົ້ນອໍ້
ຍັງມີຄວາມຍິນດີໃນອາຍະຕະນະພາຍນອກ
ສີນ ສະມາທິ ແລະປັນຍາຍ່ອມບໍ່ບໍລິບູນ

[໖໓໕] ພິກຂຸເຫຼົ່ານີ້ລະຖິ້ມກິດທີ່ຄວນເຮັດ ມາເຮັດແຕ່ກິດທີ່ບໍ່ຄວນເຮັດ
ອາສະວະທັງຫຼາຍຂອງພວກທ່ານຜູ້ຜະໝາດ
ມີໃຈພອງຄືຕົ້ນອໍ້ ຍ່ອມຈະເລີນ

[໖໓໖] ສ່ວນພິກຂຸເຫຼົ່າໃດຜາຣົບກາຍະຄະຕາສະຕິດ້ວຍດີຢູ່ປະຈຳ
ພິກຂຸເຫຼົ່ານັ້ນມັກກະທຳກິດທີ່ຄວນເຮັດຢູ່ປະຈຳ ບໍ່ເຮັດກິດທີ່ບໍ່ຄວນເຮັດ
ອາສະວະຂອງພວກທ່ານຜູ້ມີສະຕິສຳປະຊັນຍະ ຍ່ອມເຖິງຄວາມສິ້ນໄປ

[໖໓໗] ເມື່ອພຣະສາດສະດາຕັດບອກທາງຊື່ໄວ້ແລ້ວ ທ່ານທັງຫຼາຍຈົ່ງດຳເນີນໄປ
ເທີ້ນ ຢ່າຢຸດສາ ກຸນລະບຸດຜູ້ຫວັງປະໂຫຍດ
ເມື່ອເຕືອນຕົນດ້ວຍຕົນເອງ ເພິ່ງນ້ອມຕົນເຂົ້າເຖິງນິບພານໄດ້

[໓໓໗]　ເມື່ອເຮົາພ່ຳເພັງພຽນຢ່າງໜັກ
ພຣະສາດສະດາເຊິ່ງມີພຣະຈັກຂຸປະເສີດໃນໂລກ
ໄດ້ຊົງສະແດງທຳອຸປະມາດ້ວຍສາຍພິນສອນເຮົາ
ເຮົາຟັງພຣະດຳຣັດຂອງພຣະອົງແລ້ວຍິນດີຢູ່ໃນຄຳສອນ

[໓໓໙]　ເຮັດສະມະຖະ^ໃຫ້ເຖິງພ້ອມເພື່ອບັນລຸປະໂຫຍດສູງສຸດ
ເຮົາບັນລຸວິດຊາ ໓ ໄດ້ເຮັດຕາມຄຳສັ່ງສອງຂອງພຸດທະເຈົ້າແລ້ວ

[໓໔໐]　ເຮົາຜູ້ນ້ອມໄປໃນເນກຂຳມະ ໔ ແລະຄວາມສະຫງັດໃຈ
ນ້ອມໄປໃນຄວາມບໍ່ບຽດບຽນ ໝົດຄວາມຍຶດໝັ້ນຖືໝັ້ນ

[໓໔໑]　ນ້ອມໄປໃນຄວາມສິ້ນຕັນຫາແລະຄວາມບໍ່ຫຼົງແຫ່ງໃຈ
ຍ້ອນເຫັນຄວາມເກີດຂຶ້ນແຫ່ງອາຍະຕະນະ ຈິດຈຶ່ງລຸດພົ້ນໄດ້ໂດຍຖືກຕ້ອງ

[໓໔໒]　ພິກຂຸຜູ້ມີຈິດສະງົບລະງັບລຸດພົ້ນໂດຍຖືກຕ້ອງ ເຮັດກິດສຳເລັດແລ້ວນັ້ນ
ຍ່ອມບໍ່ມີການສັ່ງສົມ ທັງບໍ່ມີກິດອື່ນທີ່ຈະຕ້ອງເຮັດ

[໓໔໓]　ພູຫີນແຫ່ງທຶບຍ່ອມບໍ່ສະເທືອນຍ້ອນລົມສັນໃດ
ຮູບ ສຽງ ກິ່ນ ຣົດ ໂຜດຖັບພະແລະທຳມາຣົມທັງມວນ

[໓໔໔]　ທັງທີ່ເປັນອິດຖາຣົມແລະອະນິດຖາຣົມ
ເຮັດຈິດຂອງຜູ້ໝັ້ນຄົງໃຫ້ຫວັ່ນໄຫວບໍ່ໄດ້ ສັນນັ້ນ
ຈິດຂອງຜູ້ໝັ້ນຄົງນັ້ນ ເປັນຈິດຕັ້ງໝັ້ນ ບໍ່ຫວັ່ນໄຫວ
ບໍ່ເກາະກ່ຽວດ້ວຍອາລົມອັນໃດ
ຍ້ອນຜູ້ໝັ້ນຄົງນັ້ນໄດ້ເຫັນຄວາມເສື່ອມໄປແຫ່ງອາລົມນັ້ນແລ້ວ

**ເຕຣະສະກະນິບາດ ຈົບ**

## ລວມເລື້ອງພຣະເຖຣະທີ່ມີໃນນິບາດນີ້ ຄື

໑. ພຣະໂສນະໂກລິວິສະເຖຣະມີລິດຫຼາຍອົງດຽວທ່ານັ້ນ

ແລະໃນເຕຣະສະກະນິບາດນີ້ ມີ ໑໓ ຄາຖາ ດັ່ງນີ້ແລ

# ໑໔. ຈຸດທະສະກະນິບາດ

## ໑. ຂະທິຣະວະນິຍະເຣວະຕະເຖຣະຄາຖາ

### ພາສິດຂອງພຣະຂະທິຣະວະນິຍະເຣວະຕິເຖຣະ

(ພຣະຂະທິຣະວະນິຍະເຣວະຕະເຖຣະໄດ້ກ່າວຄາຖາເຫຼົ່ານີ້ວ່າ)

[໖໔໕] ນັບແຕ່ອາດຕະມາອອກບວດເປັນບັນພະຊິດ
ບໍ່ເຄີຍດຳຣິເຖິງສິ່ງທີ່ບໍ່ດີ ປະກອບດ້ວຍໂທດເລີຍວ່າ

[໖໔໖] ຂໍສັດເຫຼົ່ານີ້ຈົ່ງຖືກບຽດບຽນ ຈົ່ງຖືກຂ້າ ຈົ່ງປະສົບທຸກ
ອາດຕະມາບໍ່ເຄີຍດຳຣິໃນໄລຍະການຍາວນານແນວນີ້

[໖໔໗] ແຕ່ຮູ້ສະເພາະການຈະເລີນເມດຕາບໍ່ມີປະມານ
ເຊິ່ງໄດ້ອົບຮົມສັ່ງສົມມາໂດຍລຳດັບຕາມທີ່ພຣະພຸດທະເຈົ້າຊົງສະແດງໄວ້ແລ້ວ

[໖໔໘] ເປັນມິດ ເປັນສະຫາຍກັບສັດທຸກຈຳພວກ
ອະນຸເຄາະສັດທຸກຈຳພວກ
ຍິນດີໃນການບໍ່ບຽດບຽນ ຈະເລີນເມດຕາຈິດທຸກເມື່ອ

[໖໔໙] ແລະເຮັດຈິດທີ່ບໍ່ງ່ອນແງ່ນ ບໍ່ຂຸ່ນເຄືອງໃຫ້ບັນເທີງ
ຈະເລີນພົມວິຫານ ທີ່ຄົນຊົ່ວສ້ອງເສບບໍ່ໄດ້

[໖໕໐] ສາວົກຂອງພຣະສຳມາສຳພຸດທະເຈົ້າເຂົ້າທຸຕິຍະຊານທີ່ບໍ່ມີວິຕົກ
ເປັນຜູ້ປະກອບດ້ວຍຄວາມເປັນຜູ້ມິດທີ່ປະເສີດໂດຍແທ້ຈິງ

[໖໕໑] ພູສິລາລ້ວນຕັ້ງໝັ້ນ ບໍ່ຫວັ່ນໄຫວ ແນ່ນສັນໃດ
ພິກຂຸກໍສັນນັ້ນ ຍ້ອນສິ້ນໂມຫະ ຍ່ອມບໍ່ຫວັ່ນໄຫວຄືພູ ສັນນັ້ນ

[໖໕໒] ຄົນຜູ້ບໍ່ມີກິເລດເຄື່ອງຍົວະຍຸ
ໃຝ່ໃຈສະແຫວງຫາຄວາມສະອາດຢູ່ປະຈຳ
ຄວາມຊົ່ວພຽງທີ່ປາຍຂົນຊາຍ
ຍ່ອມຜາກົດດັ່ງທີ່ກຸ່ມກ້ອນເຝືອ

[໖໕໓]　ເມືອງຊາຍແດນໄດ້ຮັບການຄຸ້ມຄອງທັງພາຍໃນແລະພາຍນອກ ສັນໃດ
ທ່ານທັງຫຼາຍໂຜດຄຸ້ມຄອງຕົນໃຫ້ໄດ້ ສັນນັ້ນ
ຂະນະຢ່າໄດ້ລ່ວງເລີຍທ່ານທັງຫຼາຍໄປສາ

[໖໕໔]　ອາດຕະມາບໍ່ຍາກຕາຍ
ບໍ່ຍາກເປັນຢູ່
ແຕ່ອາດຕະມາຄອຍຖ້າເວລາຢູ່
ຄືລູກຈ້າງເຮັດວຽກງານຖ້າຄ່າຈ້າງ

[໖໕໕]　ອາດຕະມາບໍ່ຍາກຕາຍ
ບໍ່ຍາກເປັນຢູ່
ແຕ່ອາດຕະມາມີສະຕິສຳປະຊັນຍະຢູ່ສະເພາະໜ້າ
ຖ້າເວລາອັນສົມຄວນ

[໖໕໖]　ອາດຕະມາປົນນິບັດພຣະສາດສະດາ
ໄດ້ເຮັດຕາມຄຳສັ່ງສອນຂອງພຣະພຸດທະເຈົ້າແລ້ວ
ປົງພາຣະທີ່ໜັກໄດ້
ຖອນຕັນຫາທີ່ນຳໄປສູ່ພົບໄດ້ຂາດແລ້ວ

[໖໕໗]　ອາດຕະມາອອກຈາກເຮືອນບວດເປັນບັນພະຊິດເພື່ອປະໂຫຍດໃດ
ປະໂຫຍດນັ້ນອັນເປັນບ່ອນສິ້ນສຸດໄປແຫ່ງສັງໂຍດທັງປວງ
ອາດຕະມາກໍໄດ້ບັນລຸແລ້ວ

[໖໕໘]　ໜ້າທີ່ທີ່ຄວນເຮັດໃຫ້ເຖິງພ້ອມມີທານແລະສີນເປັນຕົ້ນ
ທ່ານທັງຫຼາຍ ໂຜດເຮັດໃຫ້ເຖິງພ້ອມດ້ວຍຄວາມບໍ່ຜະໝາດເທີ້ນ
ນີ້ເປັນຄຳສັ່ງສອນຂອງອາດຕະມາ
ອາດຕະມາລຸດພົ້ນຈາກກິເລດແລະພົບໄດ້ທັງໝົດແລ້ວ
ຈັກປະຣິນິບພານແລ

## ໘. ໂຄທັດຕະເຖຣະຄາຖາ

### ພາສິດຂອງພຣະໂຄທັດຕະເຖຣະ

(ພຣະໂຄທັດຕະເຖຣະໄດ້ກ່າວຄາຖາເຫຼົ່ານີ້ວ່າ)

[໓໕໗]	ງົວອາຊາໄນດີຖືກຫຸງມທີ່ແອກກວຽນ
ສາມາດນໍາແອກກວຽນໄປໄດ້
ຖືກພາຣະໜັກບຽດບຽນ
ກໍບໍ່ຍອມກໍາຈັດແອກກວຽນທີ່ຫຸງມໄວ້ ສັນໃດ

[໓໓໐]	ເຫຼົ່າຊົນທີ່ບໍລິບູນດ້ວຍປັນຍາ
ຄືມະຫາສະມຸດທີ່ເຕັມປ່ຽມດ້ວຍນໍ້າ
ຍ່ອມບໍ່ດູໝິ່ນຊົນອື່ນ ໆ ສັນນັ້ນ
ຂໍ້ນີ້ເປັນດັ່ງອະຣິຍະທໍາຂອງຄົນທັງຫຼາຍ

[໓໓໑]	ນໍຣະຊົນຄົນໜຸ່ມທັງຫຼາຍທີ່ຕົກຢູ່ໃນອໍານາດຂອງການເວລາ
ໄປຕາມອໍານາດຂອງຄວາມຈະເລີນແລະຄວາມເສື່ອມ
ຍ່ອມປະສົບທຸກ ແລະຍ່ອມເສົ້າໂສກ

[໓໓໔]	ເຫຼົ່າປຸຖຸຊົນທີ່ຍັງໂງ່ຈ້າ ມັກບໍ່ເຫັນຕາມຄວາມເປັນຈິງ
ພໍມີສຸກເປັນເຫດກໍຟູຂຶ້ນ ພໍມີທຸກເປັນເຫດກໍຟຸບລົງ
ຈຶ່ງເດືອດຮ້ອນຍ້ອນເຫດ ໔ ປະການນີ້

[໓໓໓]	ສ່ວນອະຣິຍະຊົນທັງຫຼາຍທີ່ລ່ວງຕັນຫາ
ເປັນເຫດພົວພັນໃນທຸກຂະເວທະນາ ສຸກຂະເວທະນາ
ແລະອະທຸກຂະມະສຸກຂະເວທະນາ
ຕັ້ງໝັ້ນ ບໍ່ຫວັ່ນໄຫວຄືເສົາເຂື່ອນ ບໍ່ຟູຂຶ້ນຫຼືຟຸບລົງ

[໓໓໔]	ຍ່ອມບໍ່ຕິດໃນລາບ ເສື່ອມລາບ ຍົດ ເສື່ອມຍົດ
ນິນທາ ສັນເສີນ ສຸກແລະທຸກເລີຍ

[໓໓໕]	ທ່ານເຫຼົ່ານັ້ນບໍ່ຕິດໃນໂລກກະທໍາທຸກປະເພດ
ຄືຢາດນໍ້າບໍ່ຕິດເທິງໃບບົວ
ທີຣະຊົນທັງຫຼາຍປະສົບສຸກ ບໍ່ປຣາໄຊໃນທີ່ທຸກແຫ່ງ

[໓໓໓]	ການບໍ່ໄດ້ລາບໂດຍທໍາກັບການໄດ້ລາບໂດຍບໍ່ຖືກທໍາ
໔ ແນວນີ້ ການບໍ່ໄດ້ລາບແຕ່ຖືກທໍາປະເສີດກວ່າ
ການໄດ້ລາບໂດຍບໍ່ຖືກທໍາບໍ່ປະເສີດເລີຍ

[໖໖໗] ຜູ້ບໍ່ມີຄວາມຮູ້ ມີຍົດ ກັບຜູ້ມີຄວາມຮູ້ແຕ່ບໍ່ມີຍົດ
໒ ຈຳພວກນີ້ ຜູ້ມີຄວາມຮູ້ ແຕ່ບໍ່ມີຍົດ ປະເສີດກວ່າ
ຜູ້ບໍ່ມີຄວາມຮູ້ ມີຍົດ ບໍ່ປະເສີດເລີຍ

[໖໖໘] ການທີ່ຄົບພານສັນເສີນ ກັບການທີ່ບັນດິດຕິຕຽນ
໒ ແນວນີ້ ການທີ່ບັນດິດຕິຕຽນນັ້ນແລປະເສີດກວ່າ
ການທີ່ຄົບພານສັນເສີນບໍ່ປະເສີດເລີຍ

[໖໖໙] ຄວາມສຸກທີ່ເກີດຍ້ອນອາໄສການມະຄຸນ
ກັບຄວາມທຸກທີ່ເກີດແຕ່ຄວາມສະຫງັດ
໒ ແນວນີ້ ຄວາມທຸກທີ່ເກີດແຕ່ຄວາມສະຫງັດ ປະເສີດກວ່າ
ຄວາມສຸກທີ່ເກີດຍ້ອນອາໄສການມະຄຸນ ບໍ່ປະເສີດເລີຍ

[໖໗໐] ຄວາມເປັນຢູ່ໂດຍບໍ່ຖືກທຳ ກັບຄວາມຕາຍໂດຍຖືກຕ້ອງຕາມທຳ
໒ ແນວນີ້ ຄວາມຕາຍໂດຍຖືກຕ້ອງຕາມທຳປະເສີດກວ່າ
ຄວາມເປັນຢູ່ໂດຍບໍ່ຖືກທຳ ບໍ່ປະເສີດເລີຍ

[໖໗໑] ທ່ານເຫຼົ່າໃດລະຄວາມຍິນດີ ຍິນຮ້າຍໄດ້
ມີຈິດສະຫງົບ ທ່ຽວໄປໃນພົບນ້ອຍພົບໃຫຍ່ ບໍ່ຕິດຢູ່ໃນໂລກ
ທ່ານເຫຼົ່ານັ້ນບໍ່ມີຄວາມຮັກຫຼືຄວາມຊັງ

[໖໗໒] ຈະເລີນໂພດຊົງ ໗ ອິນຊີ ໕ ແລະພະລະ ໕
ບັນລຸຄວາມສະຫງົບຢ່າງຍິ່ງ ບໍ່ມີອາສະວະ ຍ່ອມປະຣິນິບພານ

**ຈຸດທະສະກະນິບາດ ຈົບ**

## ລວມເລື້ອງພຣະເຖຣະທີ່ມີໃນນິບາດນີ້ ຄື

ພຣະເຖຣະ ໒ ອົງນີ້ ມີລິດຫຼາຍ ຄື

໑. ພຣະຂະທິຣະວະນິຍະເຣວະຕະເຖຣະ ໒. ພຣະໂຄທັດຕະເຖຣະ

ໃນຈຸດທະສະກະນິບາດນີ້ ມີ ໒໘ ຄາຖາ ດັ່ງນີ້ແລ

# ໑໕. ໂສລະສະກະນິບາດ

## ໑. ອັນຍາສິໂກນທັນຍະເຖຣະຄາຖາ

### ພາສິດຂອງພຣະອັນຍາໂກນທັນຍະເຖຣະ

(ທ້າວສັກກະເທວະຣາດຕັດພາສິດທີ ໑ ວ່າ)

[໖໗໓] ຂ້ານ້ອຍນີ້ສະດັບທຳເຊິ່ງມີອັດຖະຣົດຫຼາຍ ຈຶ່ງເຫຼື້ອມໃສຢ່າງຍິ່ງ
ທຳທີ່ຄາຍກຳໜັດພໍໃຈ ຍ້ອນບໍ່ຢຶດໝັ້ນໂດຍເດັດຂາດ
ພຣະຜູ້ເປັນເຈົ້າສະແດງໄວ້ແລ້ວ

(ພຣະອັນຍາໂກນທັນຍະເຖຣະໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໖໗໔] ອາລົມທີ່ວິຈິດໃນໂລກຫຼວງຫຼາຍ
ເຫັນຈະຍ່ຳຍີຄົນທີ່ຍັງມີຄວາມດຳຣິເຖິງອາລົມ ວ່າງາມ
ເຊິ່ງປະກອບດ້ວຍຣາຄະໃນພື້ນປະຖະພີນີ້

[໖໗໕] ເມື່ອຝົນທ່າໃຫຍ່ຕົກລົງມາຊ່ອຍລະງັບຝຸ່ນທຸລີທີ່ລົມພັດໃຫ້ຟຸ້ງຂຶ້ນໄດ້ ສັນໃດ
ເມື່ອໃດພຣະອະຣິຍະສາວົກພິຈາລະນາເຫັນດ້ວຍປັນຍາ
ເມື່ອນັ້ນ ຄວາມດຳຣິຜິດຍ່ອມລະງັບໄປໄດ້ ສັນນັ້ນ

[໖໗໖] ເມື່ອໃດ ພຣະອະຣິຍະສາວົກພິຈາລະນາເຫັນດ້ວຍປັນຍາວ່າ
ສັງຂານທັງຫຼາຍທັງປວງບໍ່ທ່ຽງ
ເມື່ອນັ້ນ ຍ່ອມໜ່າຍໃນທຸກ ນັ້ນເປັນທາງແຫ່ງຄວາມບໍລິສຸດ

[໖໗໗] ເມື່ອໃດ ພຣະອະຣິຍະສາວົກຍ່ອມພິຈາລະນາເຫັນດ້ວຍປັນຍາວ່າ
ສັງຂານທັງຫຼາຍທັງປວງເປັນທຸກ
ເມື່ອນັ້ນ ຍ່ອມໜ່າຍໃນທຸກ ນັ້ນເປັນທາງແຫ່ງຄວາມບໍລິສຸດ

[໖໗໘] ເມື່ອໃດ ພຣະອະຣິຍະສາວົກຍ່ອມພິຈາລະນາເຫັນດ້ວຍປັນຍາວ່າ
ທຳທັງຫຼາຍທັງປວງເປັນອະນັດຕາ
ເມື່ອນັ້ນ ຍ່ອມໜ່າຍໃນທຸກ ນັ້ນເປັນທາງແຫ່ງຄວາມບໍລິສຸດ

[໖໗໙]　ອັນຍາໂກນທັນຍະເຖຣະຜູ້ຕັດສະຣູ້ຕາມພຣະພຸດທະເຈົ້າ
ໄດ້ມີຄວາມບາກບັ່ນຢ່າງແຮງກ້າ ລະຄວາມເກີດແລະຄວາມຕາຍໄດ້
ພ່ຳເພັງມັກຄະພົມມະຈັນຢ່າງບໍຣິບູນໝົດສິ້ນ

[໖໘໐]　ຕັດບ້ວງຄືໂອຄະ[១] ຕະປູຕຶງໃຈ[៤] ຢ່າງໝັ້ນຄົງ
ແລະທຳລາຍພູທີ່ທຳລາຍໄດ້ຍາກແລ້ວ
ຂ້າມໄປເຖິງຝັ່ງຄືນິບພານ ມີປົກກະຕິເຂົ້າຊານ
ພົ້ນຈາກເຄື່ອງມັດຄືກິເລດມານໄດ້ແລ້ວ

[໖໘໑]　ພິກຂຸທີ່ຍັງມີຈິດຟຸ້ງຊ່ານ ກັບກອກ
ຄົບຫາແຕ່ມິດຊົ່ວ ຖືກຄື້ນ(ຄືຄວາມຜູກໂກດ)ຊັດໄປ
ຈົມໃນແມ່ນ້ຳໃຫຍ່ຄືສົງສານ

[໖໘໒]　ສ່ວນພິກຂຸທີ່ມີຈິດບໍ່ຟຸ້ງຊ່ານ ບໍ່ກັບກອກ ມີປັນຍາຮັກສາຕົນ
ສັງລວມອິນຊີ ຄົບຫາແຕ່ມິດດີ
ເປັນນັກປາດ ເພິ່ງທຳຄວາມສິ້ນທຸກໄດ້

[໖໘໓]　ນໍຣະຊົນຜູ້ຮູ້ປະມານໃນເຂົ້າແລະນ້ຳຍ່ອມຈ່ອຍແຫ້ງ
ມີໂຕສະພັ່ງໄປດ້ວຍເສັ້ນເອັນຄ້າຍເຄືອຍານາງ ແຕ່ມີໃຈບໍ່ທຍໍ້ທໍ້

[໖໘໔]　ຖືກຝູງເຮືອດແລະຍຸງກັດໃນປ່າໃຫຍ່
ເພິ່ງເປັນຜູ້ມີສະຕິອົດກັ້ນໃນອັນຕະລາຍນັ້ນ ຄືຊ້າງໃນສົງຄາມ

[໖໘໕]　ອາດຕະມາບໍ່ຍາກຕາຍ ບໍ່ຍາກເປັນຢູ່
ແຕ່ຄອຍຖ້າເວລາຢູ່ ຄືລູກຈ້າງເຮັດວຽກງານຖ້າຄ່າຈ້າງ

[໖໘໖]　ອາດຕະມາບໍ່ຍາກຕາຍ ບໍ່ຍາກເປັນຢູ່
ແຕ່ອາດຕະມາມີສະຕິສຳປະຊັນຍະຢູ່ສະເພາະໜ້າ ຖ້າເວລາອັນຄວນ

[໖໘໗]　ອາດຕະມາປົນນິບັດພຣະສາດສະດາ
ໄດ້ເຮັດຕາມຄຳສັ່ງສອນຂອງພຣະພຸດທະເຈົ້າແລ້ວ
ປົງພາຣະທີ່ໜັກໄດ້ ຖອນຕັນຫາທີ່ນຳໄປສູ່ພົບໄດ້ຂາດແລ້ວ

[໕໗໗] ອາດຕະມາອອກຈາກເຮືອນບວດເປັນບັນພະຊິດເພື່ອປະໂຫຍດໃດ
ປະໂຫຍດນັ້ນອາດຕະມາໄດ້ບັນລຸແລ້ວ
ຈະມີປະໂຫຍດອັນໃດດ້ວຍສັດທິວິຫາຣິກຜູ້ວ່າຍາກສຳລັບອາດຕະມາ

# ໔. ອຸທາຍີເຖຣະຄາຖາ

## ພາສິດຂອງພຣະອຸທາຍີເຖຣະ

(ພຣະອຸທາຍີເຖຣະເມື່ອຈະຊົມເຊີຍພຣະສາດສະດາ ໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໕໗໘] ພຣະສຳມາສຳພຸດທະເຈົ້າຜູ້ຊົງບັງເກີດໃນໝູ່ມະນຸດ
ເຝິກຝົນພຣະອົງແລ້ວ ມີພຣະທະໄຫຕັ້ງໝັ້ນ
ຊົງດໍາເນີນໄປໃນທາງທີ່ປະເສີດ ຊົງຍິນດີໃນທຳເປັນທີ່ສະງົບລະງັບຈິດ

[໕໘໐] ຊົງເຖິງຄວາມສຳເລັດແຫ່ງທຳທັງປວງພຣະອົງໃດທີ່ມະນຸດທັງຫຼາຍ ນອບນ້ອມ ພຣະສຳມາສຳພຸດທະເຈົ້າພຣະອົງນັ້ນແມ່ນເທວະດາທັງຫຼາຍກໍນອບນ້ອມ ເຮົາຟັງມາແຕ່ພຣະອະຣະຫັນທັງຫຼາຍດັ່ງວ່າມານີ້

[໕໘໑] ເທວະດາແລະມະນຸດທັງຫຼາຍຍ່ອມນອບນ້ອມພຣະສຳມາສຳພຸດທະເຈົ້າພຣະອົງໃດ ຜູ້ຊົງລ່ວງສັງໂຍດທັງປວງ ສະເດັດອອກຈາກປ່າ ມາສູ່ນິບພານ ສະເດັດອອກຈາກກາມມາຍິນດີໃນເນກຂຳມະ ຄືຄຳທີ່ພົ້ນຈາກຫີນ

[໕໘໔] ພຣະສຳມາສຳພຸດທະເຈົ້າພຣະອົງນັ້ນແລ ເປັນຄືຊ້າງໂຕປະເສີດ ຊົງຮຸ່ງເຮືອງລ່ວງໂລກພ້ອມທັງເທວະໂລກ ຄືພູຫິມະວັນເໜືອພູສີລາເຫຼົ່າອື່ນ ຊົງມີພຣະນາມວ່ານາກໂດຍແທ້ຈິງ ຊົງປະເສີດກວ່າຜູ້ທີ່ມີນາມວ່ານາກທັງໝົດ

[໕໘໓] ເຮົາຈະສະແດງຜູ້ທີ່ໄດ້ນາມວ່ານາກໂດຍແທ້ຈິງນັ້ນແກ່ພວກທ່ານ
ຍ້ອນຜູ້ທີ່ບໍ່ເຮັດຊົ່ວທຸກຢ່າງ ຊື່ວ່ານາກ
ຄວາມສະງົບສະງ່ຽມແລະຄວາມບໍ່ບຽດບຽນທັງ ໔ ນັ້ນ
ເປັນຕີນໜ້າຂອງຜູ້ທີ່ໄດ້ນາມວ່າ ຊ້າງ

[໕໘໔] ສະຕິ ແລະສຳປະຊັນຍະທັງ ໔ ນັ້ນ
ເປັນຕີນຫຼັງຂອງຜູ້ທີ່ໄດ້ນາມວ່າຊ້າງ
ຜູ້ທີ່ໄດ້ນາມວ່າພະຍາຊ້າງ
ມີສັດທາເປັນງວງ ມີອຸເປກຂາເປັນງາຂາວ

[໖໙໘] ມີສະຕິເປັນຄໍ ມີປັນຍາເຄື່ອງພິຈາລະນາຄົ້ນຄວ້າທຳເປັນສຽນ
ມີທຳຄືສະມະຖະແລະວິປັດສະນາເຊິ່ງເປັນທີ່ລວມຢູ່ແຫ່ງປັນຍາເປັນທ້ອງ ມີວິເວກ
ເປັນຫາງ

[໖໙໖] ພະຍາຊ້າງຄືພຣະພຸດທະເຈົ້ານັ້ນຊົງເຂົ້າຊານປະຈຳ
ຊົງຍິນດີໃນນິບພານ ມີພຣະຫະໄທຕັ້ງໝັ້ນດີພາຍໃນ
ເມື່ອສະເດັດພຣະຣາດຊະດຳເນີນ ກໍມີພຣະຫະໄທຕັ້ງໝັ້ນ
ປະທັບຢືນ ກໍມີພຣະຫະໄທຕັ້ງໝັ້ນ

[໖໙໗] ເມື່ອບັນທົມ ກໍມີພຣະຫະໄທຕັ້ງໝັ້ນ
ແມ່ນປະທັບນັ່ງ ກໍມີພຣະຫະໄທຕັ້ງໝັ້ນ ຊົງສັງລວມທຸກຢ່າງ
ນີ້ເປັນຄຸນສົມບັດຂອງພະຍາຊ້າງຄືພຣະພຸດທະເຈົ້າ

[໖໙໘] ພະຍາຊ້າງ ຄືພຣະພຸດທະເຈົ້ານັ້ນ ບໍຣິໂພກສິ່ງທີ່ບໍ່ມີໂທດ
ບໍ່ບໍຣິໂພກສິ່ງທີ່ມີໂທດ ໄດ້ອາຫານແລະເຄື່ອງນຸ່ງຫົ່ມແລ້ວງົດການສັ່ງສົມ

[໖໙໙] ຕັດສັງໂຍດ ກິເລດເຄື່ອງຜູກພັນນ້ອຍໃຫຍ່ທັງໝົດ
ບໍ່ມີຄວາມຫ່ວງໃຍເລີຍ ໄປໄດ້ທຸກທິດ

[໗໐໐] ດອກບົວຂາວມີກິ່ນຫອມຫວນ ຊວນໃຫ້ອອນຊອນໃຈເກີດກໍໃນນໍ້າ
ເຕີບໃຫຍ່ກໍໃນນໍ້າ ແຕ່ບໍ່ຕິດຢູ່ກັບນໍ້າ ແມ່ນສັນໃດ

[໗໐໑] ພຣະພຸດທະເຈົ້າສະເດັດອຸບັດໃນໂລກ ທັງຊົງຢູ່ໃນໂລກ
ກໍບໍ່ຊົງຕິດຢູ່ກັບໂລກ
ຄືດອກບົວບໍ່ຕິດຢູ່ກັບນໍ້າ ຄືກັນສັນນັ້ນ

[໗໐໔] ໄຟກອງໃຫຍ່ທີ່ລຸກເປັນແປວ ເມື່ອໝົດເຊື້ອກໍດັບໄປ
ເຖິງເມື່ອຍັງມີເຖົ່າຢູ່ ເຂົາກໍຮຽກວ່າ ໄຟດັບ

[໗໐໖] ອຸປະມາທີ່ໃຫ້ຮູ້ແຈ່ມແຈ້ງເນື້ອຄວາມຂໍ້ນີ້
ວິນຍູຊົນທັງຫຼາຍສະແດງໄວ້ແລ້ວ
ທ່ານຜູ້ທີ່ມີນາມວ່າມະຫານາກທັງຫຼາຍຈະຮູ້ແຈ້ງພະຍາຊ້າງຄືພຣະພຸດທະເຈົ້າ
ອັນເຮົາຜູ້ໄດ້ນາມວ່ານາກສະແດງໄວ້ແລ້ວ

[໑໐໔] ພະຍາຊ້າງຄືພຣະພຸດທະເຈົ້າ ປາສະຈາກຣາຄະ ໂທສະ ໂມຫະ
ໝົດອາສະວະ ເມື່ອຊົງລະພຣະວໍຣະກາຍ ຈະບໍ່ມີອາສະວະ ປະຣິນິບພານ

**ໂສລະສະກະນິບາດ ຈົບ**

**ລວມເລື່ອງພຣະເຖຣະທີ່ມີໃນນິບາດນີ້ ຄື**

ພຣະເຖຣະ ໔ ອົງນີ້ ມີລິດຫຼາຍ ຄື

໑. ພຣະອັນຍາໂກນທັນຍະເຖຣະ ໔. ພຣະອຸທາຍີເຖຣະ

ໃນໂສລະສະກະນິບາດນີ້ ມີ ໖໔ ຄາຖາ ດັ່ງນີ້ແລ

# ໑໖. ວີສະຕິນິບາດ

## ໑. ອະທິມຸດຕະເຖຣະຄາຖາ

### ພາສິດຂອງພຣະອະທິມຸດຕະເຖຣະ

(ຫົວໜ້າໂຈນ ເມື່ອຈະສັນເສີນພຣະເຖຣະ ໄດ້ກ່າວ ໔ ພາສິດເຫຼົ່ານີ້ວ່າ)

[໑໐໕] ແຕ່ກ່ອນ ເຫຼົ່າສັດທີ່ພວກເຮົາຂ້າເພື່ອບູຊາຍັນຫຼືເພື່ອຊັບ
ຍ່ອມເກີດຄວາມຢ້ານທັ້ງຫຼາຍ ຍ່ອມພາກັນຫວາດຫວັ່ນແລະຈົ່ມເພີ້ຮ່ຳໄຮ

[໑໐໖] ທ່ານນັ້ນບໍ່ມີຄວາມຢ້ານ ສີໜ້າຜ່ອງໃສຫຼາຍ
ຍ້ອນເຫດໃດ ທ່ານຈຶ່ງບໍ່ຮ່ຳໄຮ ໃນເມື່ອເກີດໄພໃຫຍ່ແນວນີ້

(ພຣະເຖຣະ ເມື່ອຈະສະແດງທຳໂຜດຫົວໜ້າໂຈນ ຈຶ່ງໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໑໐໗] ທ່ານຫົວໜ້າ ສຳລັບຜູ້ທີ່ບໍ່ເຍື່ອໃຍໃນຊີວິດຍ່ອມບໍ່ມີທຸກທາງໃຈ
ໄພທຸກຢ່າງຜູ້ທີ່ສິ້ນສັງໂຍດລ່ວງພົ້ນໄພທຸກຢ່າງໄດ້ແລ້ວ

[໑໐໘] ເມື່ອສິ້ນຕັນຫາທີ່ນຳໄປສູ່ພົບກໍຍ່ອມບໍ່ມີຄວາມຢ້ານຕາຍໂດຍປະການໃດປະການໜຶ່ງໃນປັດຈຸບັນນັ້ນ ຄືຄົນທີ່ບໍ່ຢ້ານຄວາມໜັກ ໃນເມື່ອ ວາງຂອງໜັກລົງແລ້ວ

[໗໐໗]	ພົມມະຈັນອາດຕະມາປະພຶດດີແລ້ວ
ແລະແມ່ນມັກອາດຕະມາກໍອົບຮົມດີແລ້ວ
ອາດຕະມາຈຶ່ງບໍ່ມີຄວາມຢ້ານຕາຍ ຄືຄົນບໍ່ຢ້ານພະຍາດໃນເມື່ອດີພະຍາດ

[໗໑໐]	ພົມມະຈັນອາດຕະມາປະພຶດດີແລ້ວ
ແລະແມ່ນມັກອາດຕະມາກໍອົບຮົມດີແລ້ວ
ອາດຕະມາໄດ້ເຫັນພົບວ່າເປັນສິ່ງທີ່ບໍ່ໜ້າຍິນດີ
ຄືຄົນດື່ມຢາພິດແລ້ວຄາຍອອກມາ

[໗໑໑]	ຜູ້ທີ່ເຖິງຝັ່ງ ບໍ່ຍຶດໝັ້ນ ສຳເລັດກິດ ໝົດອາສະວະ
ຍ່ອມພໍໃຈຍ້ອນຄວາມສິ້ນອາຍຸ
ຄືຜູ້ຮ້າຍພົ້ນຈາກການຖືກປະຫານຊີວິດ ກໍແຈ່ມໃສຍິນດີຢູ່

[໗໑໒]	ຜູ້ບັນລຸສະພາວະທຳຊັ້ນສູງສຸດ ບໍ່ມີຄວາມເຍື່ອໃຍໃນໂລກທັງມວນ
ເມື່ອຈະຕາຍກໍບໍ່ເສົ້າໂສກ ຄືຄົນທີ່ພົ້ນຈາກເຮືອນທີ່ຖືກໄຟໄໝ້

[໗໑໓]	ພຣະສຳມາສຳພຸດທະເຈົ້າຜູ້ຊົງສະແຫວງຫາຄຸນອັນຍິ່ງໃຫຍ່ຕັດວ່າ
ຄວາມກ່ຽວຂ້ອງກັນແນວໃດແນວໜຶ່ງກໍດີ ພົບທີ່ໄດ້ໃນໝູ່ສັດກໍດີ
ພຣະສຳມາສຳພຸດທະເຈົ້າຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ຕັດວ່າ
ສິ່ງນີ້ທັງໝົດບໍ່ມີອິດສະຫຼະ

[໗໑໔]	ພຣະອະຣິຍະສາວົກຜູ້ຮູ້ແຈ້ງພົບ ໓ ນັ້ນ
ຕາມທີ່ພຣະພຸດທະເຈົ້າຊົງສະແດງໄວ້ແລ້ວ
ບໍ່ຍຶດພົບໃດ ໆ ຄືຄົນບໍ່ຈັບກ້ອນເຫຼັກແດງລຸກເປັນແປວ

[໗໑໕]	ອາດຕະມາບໍ່ມີຄວາມຄິດວ່າ
ເຮົາໄດ້ເປັນ ເຮົາຈະເປັນ ເຮົາຈັກບໍ່ເປັນແນວນີ້ອີກ
ສັງຂານທັງຫຼາຍຈັກດັບໄປ ອາດຕະມາຈະຮ່ຳໄຮເຖິງສັງຂານນັ້ນໄປເຮັດຫຍັງ

[໗໑໖]	ທ່ານຫົວໜ້າ ສຳລັບຜູ້ພິຈາລະນາເຫັນຄວາມເກີດຂຶ້ນແຫ່ງທຳ
ລ້ວນ ໆ ຄວາມສືບເນື່ອງແຫ່ງສັງຂານລ້ວນ ໆ ຕາມທີ່ເປັນຈິງ
ຍ່ອມບໍ່ມີຄວາມຢ້ານ

[໗໑໗]	ເມື່ອໃດ ບຸກຄົນພິຈາລະນາເຫັນໂລກວ່າ
ສະເໝີດ້ວຍຫຍ້າແລະໄມ້ດ້ວຍປັນຍາ

ເມື່ອນັ້ນ ເຂົາເຊິ່ງບໍ່ຢຶດຖືວ່າເປັນຂອງເຮົາ
ຍ່ອມບໍ່ເສົ້າໂສກວ່າ ຂອງເຮົາບໍ່ມີ

[໗໑໙] ອາດຕະມາເບື່ອໜ່າຍຮ່າງກາຍ ບໍ່ຕ້ອງການພົບ
ກາຍນີ້ຈະແຕກ ແລະຈະບໍ່ມີກາຍອື່ນອີກ

[໗໑໘] ຫາກພວກທ່ານປາຖະໜາຈະເຮັດກິດໃດດ້ວຍຮ່າງກາຍ
ຂໍເຊີນເຮັດກິດນັ້ນໄດ້ຕາມຄວາມປາຖະໜາເທີ້ນ
ໃນການເຮັດບໍ່ເຮັດນັ້ນ ອາດຕະມາຈະບໍ່ມີທັງຄວາມຄຽດແຄ້ນແລະພໍໃຈ ຍ້ອນ
ການເຮັດນັ້ນເປັນເຫດ

[໗໔໐] ພວກໂຈນຟັງຄໍາຂອງພຣະອະທິມຸດຕະເຖຣະນັ້ນເຊິ່ງໜ້າອັດສະຈັນ
ເຮັດໃຫ້ຂົນຊູຊັນ ແລ້ວວາງສັດຕາວຸດ
ໄດ້ກ່າວເນື້ອຄວາມນີ້ວ່າ

[໗໔໑] ທ່ານຜູ້ຈະເລີນ ທ່ານບໍ່ມີຄວາມເສົ້າໂສກນີ້
ຍ້ອນທ່ານເຮັດກໍາອັນໃດໄວ້
ຫຼືໃຜເປັນອາຈານຂອງທ່ານ
ຫຼືຍ້ອນອາໄສຄໍາສອນຂອງໃຜ
ພຣະອະທິມຸດຕະເຖຣະ

(ໄດ້ຟັງດັ່ງນັ້ນແລ້ວ ເມື່ອຈະໃຫ້ຄໍາຕອບ ຈຶ່ງໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໗໔໔] ພຣະສາດສະດາຜູ້ເປັນສັບພັນຍູ ຊົງຮູ້ເຫັນທໍາທັງປວງ
ຊົງຊະນະໝູ່ມານ ມີພຣະກະລຸນາອັນໃຫຍ່ຫຼວງ
ຊົງບໍາລຸງຮັກສາສັດໂລກທັງມວນ
ເປັນອາຈານຂອງອາດຕະມາ

[໗໔໗] ພຣະອົງໄດ້ຊົງສະແດງທໍາ
ທີ່ໃຫ້ເຖິງຄວາມສິ້ນອາສະວະຢ່າງປະເສີດນີ້ໄວ້
ຍ້ອນອາໄສຄໍາສັ່ງສອນຂອງພຣະອົງ
ອາດຕະມາຈຶ່ງໄດ້ຄວາມບໍ່ເສົ້າໂສກນີ້ແລ

[໗໔໔] ພວກໂຈນຟັງຄໍາສຸພາສິດຂອງພຣະອະທິມຸດຕະເຖຣະຜູ້ເປັນລືສີ
ຈຶ່ງພາກັນວາງສັດຕາແລະອາວຸດ

ລາງພວກກໍໄດ້ງົດເວັ້ນກຳນັ້ນ
ແລະລາງພວກກໍໄດ້ຂໍບວດ

[໗໘໕] ພວກເຂົາ ເມື່ອບວດໃນພຣະສາດສະໜາຂອງພຣະສຸຄົດເຈົ້າ
ຈະເລີນໂພດຊົງ ໗ ແລະພະລະ ໕ ແລ້ວ
ເປັນບັນດິດ ມີຈິດເບີກບານ ຍິນດີ ອົບຮົມອິນຊີແລ້ວ
ໄດ້ບັນລຸສັນຕະບົດຄືນິບພານ ອັນບໍ່ມີປັດໄຈອັນໃດ ໆ ປຸງແຕ່ງ

## ໘. ປາຣາປະຣິຍະເຖຣະຄາຖາ

### ພາສິດຂອງພຣະປາຣາປະຣິຍະເຖຣະ

(ພຣະປາຣາປະຣິຍະເຖຣະເມື່ອຈະປະກາດອາການທີ່ຕົນຄິດ ຈຶ່ງໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໗໘໖] ພິກຂຸຊື່ປາຣາປະຣິຍະ ເປັນສະມະນະ ນັ່ງຢູ່ແຕ່ລຳພັງຜູ້ດຽວ
ມີຈິດສະງົບສະຫງັດເຂົ້າຊານຢູ່ ໄດ້ມີຄວາມຄິດວ່າ

[໗໘໗] ຄົນເພິ່ງເຮັດຫຍັງໂດຍລຳດັບ
ປະພຶດຂໍ້ວັດປະຕິບັດແນວໃດ ປະພຶດມາຣະຍາດແນວໃດ
ຈຶ່ງຈະຊື່ວ່າເພິ່ງເຮັດກິດຂອງຕົນແລະບໍ່ບຽດບຽນໃຜ ໆ

[໗໘໘] ອິນຊີທັງຫຼາຍນັ້ນແລ ຍ່ອມມີໄວ້ເພື່ອເປັນປະໂຫຍດ
ແລະບໍ່ເປັນປະໂຫຍດສຳລັບມວນມະນຸດ
ອິນຊີທີ່ບໍ່ໄດ້ລະວັງຮັກສາຍ່ອມເປັນໄປເພື່ອບໍ່ແມ່ນປະໂຫຍດ
ສ່ວນອິນຊີທີ່ລະວັງຮັກສາແລ້ວຍ່ອມເປັນໄປເພື່ອປະໂຫຍດ

[໗໘໙] ຄົນທີ່ລະວັງຮັກສາແລະຄຸ້ມຄອງອິນຊີທັ່ງນັ້ນ
ຊື່ວ່າເປັນຜູ້ເຮັດກິດຂອງຕົນ ແລະບໍ່ເພິ່ງບຽດບຽນໃຜ ໆ

[໗໙໐] ຖ້າຜູ້ໃດບໍ່ຫ້າມຈັກຂຸນຊີທີ່ເປັນໄປໃນຮູບທັງຫຼາຍມັກບໍ່ເຫັນໂທດ
ຜູ້ນັ້ນຍ່ອມພົ້ນຈາກທຸກບໍ່ໄດ້ເລີຍ

[໗໙໑] ອັນໜຶ່ງ ຜູ້ໃດບໍ່ຫ້າມໂສຕິນຊີທີ່ເປັນໄປໃນສຽງທັງຫຼາຍ
ມັກບໍ່ເຫັນໂທດ ຜູ້ນັ້ນຍ່ອມພົ້ນຈາກທຸກບໍ່ໄດ້ເລີຍ

[ກ໓໔] ຫາກຜູ້ໃດບໍ່ເຫັນອຸບາຍເປັນທີ່ສະລັດອອກ ສ້ອງເສບກາມ
ຜູ້ນັ້ນຍັງຕິດຢູ່ໃນກາມ ຍ່ອມພົ້ນຈາກທຸກບໍ່ໄດ້

[ກ໓໓] ຜູ້ໃດຍັງຄຳນຶງເຖິງຣົດສົ້ມ ຫວານ ແລະຂົມ
ຕິດຢູ່ໃນຄວາມຢາກໃນຣົດ ຍ່ອມບໍ່ຮູ້ສຶກເຖິງຄວາມຄິດໃນໃຈທີ່ເກີດຂຶ້ນວ່າ
ເຮົາຈະເຮັດບ່ອນສຸດທຸກ ຜູ້ນັ້ນກໍຍ່ອມພົ້ນຈາກທຸກບໍ່ໄດ້

[ກ໓໔] ຜູ້ໃດຍັງນຶກເຖິງໂຜດຖັບພະທີ່ສວຍງາມ ບໍ່ປະຕິກູນ ຍິນດີແລ້ວ
ຜູ້ນັ້ນຍ່ອມປະສົບທຸກຕ່າງ ໆ ເຊິ່ງມີຣາຄະເປັນເຫດ

[ກ໓໕] ຜູ້ໃດບໍ່ອາດລະວັງຮັກສາໃຈຈາກທຳມາຣົມເຫຼົ່ານີ້
ທຸກທີ່ເກີດຈາກກະແສອາລົມທັງ ໕ ຍ່ອມຕິດຕາມຜູ້ນັ້ນ
ຍ້ອນບໍ່ລະວັງຮັກສາໃຈນັ້ນ

[ກ໓໖] ຮ່າງກາຍນີ້ເຕັມໄປດ້ວຍໜອງ ເລືອດ ແລະຊາກສົບເປັນຈຳນວນຫຼາຍ ທີ່ນໍ
ຣະຊົນຜູ້ກ້າສ້າງໄວ້ ກັງງເກົາ ວິຈິດງົດງາມແຕ່ພາຍນອກ
ພາຍໃນເຕັມໄປດ້ວຍຂອງບໍ່ສະອາດ ມີຄູດເປັນຕົ້ນ ດຸດສະມຸກ

[ກ໓໗] ທີ່ເຜັດຮ້ອນ ມີຣົດຫວານຊື່ນໃຈ ຜູກພັນດ້ວຍຄວາມຮັກ
ເປັນທຸກ ສາບໄວ້ດ້ວຍຂອງທີ່ໜ້າຊື່ນໃຈພາຍນອກ
ຄືມີດແຖທານ້ຳເຜິ້ງທີ່ຄົນຈົ໊າບໍ່ຮູ້ຊຶ້ງສັນນັ້ນ

[ກ໓໘] ບຸຣຸດທີ່ຍັງກຳໜັດຍິນດີໃນຮູບ ສຽງ ກິ່ນ (ຣົດ) ແລະໂຜດຖັບພະຂອງສະຕີ
ຍ່ອມປະສົບທຸກຕ່າງ ໆ

[ກ໓໙] ກະແສຕັນຫາໃນສະຕີທັງ ໕ ຍ່ອມໄຫຼໄປໃນທະວານທັງ ໕ ຂອງບຸຣຸດ
ຜູ້ໃດມີຄວາມພຽນອາດທຳການປ້ອງກັນກະແສຕັນຫາທັງ ໕ ນັ້ນໄດ້

[ກ໔໐] ຜູ້ນັ້ນ ມີຄວາມຮູ້ຕັ້ງຢູ່ໃນທຳ ດຸໝັ່ນ ມີປັນຍາເຄື່ອງພິຈາລະນາ
ເຖິງຈະຍິນດີຢູ່ ກໍເພິ່ງເຮັດກິດທີ່ປະກອບດ້ວຍເຫດຜົນໄດ້

[ກ໔໑] ຖ້າຍັງຕິດຢູ່ກັບການປະກອບກິດທີ່ເປັນປະໂຫຍດປັດຈຸບັນ
ຄວນເວັ້ນກິດທີ່ບໍ່ເປັນປະໂຫຍດ ເປັນຜູ້ບໍ່ຜະໝາດ
ມີປັນຍາເຄື່ອງພິຈາລະນາ ຮູ້ວ່າກິດນັ້ນບໍ່ຄວນເຮັດແລ້ວ ເພິ່ງເວັ້ນສາ

[໗໔໘] ຄວນຍຶດກິດທີ່ປະກອບປະໂຫຍດໃນປັດຈຸບັນ
ແລະຄວາມຍິນດີທີ່ປະກອບດ້ວຍທຳ ປະພຶດ ຍ້ອນຄວາມຍິນດີນັ້ນແລ ຊື່ວ່າເປັນ
ຄວາມຍິນດີສູງສຸດ

[໗໔໙] ຜູ້ໃດປາຖະໜາຈະໃຊ້ອຸບາຍຕ່າງ ໆ ເວລາຊີງເອົາສິ່ງຂອງຂອງຄົນເຫຼົ່າອື່ນ
ຂ້າ ບຽດບຽນຜູ້ອື່ນ ແລະເຮັດຜູ້ອື່ນໃຫ້ເສົ້າໂສກ
ສົກຊີງເອົາສິ່ງຂອງຂອງຄົນເຫຼົ່າອື່ນດ້ວຍຄວາມທາລຸນ ດຸຮ້າຍ
ການກະທຳຂອງຜູ້ນັ້ນບໍ່ປະກອບດ້ວຍປະໂຫຍດ

[໗໕໐] ຄົນມີກຳລັງ ເມື່ອຈະຖາກໄມ້ຍ່ອມໃຊ້ຫຼິ້ມຕອກຫຼິ້ມ ສັນໃດ
ພິກຂຸຜູ້ສະຫຼາດກໍສັນນັ້ນ ຍ່ອມໃຊ້ອິນຊີນັ້ນແລກຳຈັດອິນຊີ

[໗໕໑] ນໍຣະຊົນໃດອົບຮົມສັດທາ ວິຣິຍະ ສະຕິ ສະມາທິ ແລະປັນຍາ
ໃຊ້ອິນຊີ ໕ ເຝິກອິນຊີ ໕ ເປັນພາມ
ບໍ່ມີທຸກ ເຖິງອະນຸປາທິເສສະນິບພານ

[໗໕໒] ນໍຣະຊົນນັ້ນມີຄວາມຮູ້ ຕັ້ງຢູ່ໃນທຳ
ເຮັດຕາມອະນຸສາສະນີທີ່ເປັນຄຳສອນຂອງພຣະພຸດທະເຈົ້າທຸກປະການ
ຍ່ອມປະສົບສຸກ

## ໑. ເຕລະການິເຖຣະຄາຖາ

### ພາສິດຂອງພຣະເຕລະການິເຖຣະ

(ພຣະເຕລະການິເຖຣະໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໗໕໓] ເຮົາໄດ້ມີຄວາມພຽນ ຄົ້ນຄິດທຳຢູ່ດົນນໍ
ເມື່ອສອບຖາມສະມະນະພາມ ກໍຍັງບໍ່ໄດ້ຄວາມກະຈ່າງໃຈ

[໗໕໔] ໃນໂລກນີ້ ໃຜນໍ ເປັນຜູ້ເຖິງຝັ່ງ
ໃຜເປັນຜູ້ບັນລຸທຳທີ່ຢັ່ງລົງສູ່ອະມະຕະ
ເຮົາຈະປະຕິບັດຕາມທຳຂອງໃຜ
ເຊິ່ງຈະເປັນເຫດໃຫ້ຮູ້ແຈ້ງປະຣະມັດຖະທຳໄດ້

[ກ໔໙] ເຮົາມີຄວາມຄຶດຄືກິເລດຢູ່ພາຍໃນ ຄືປາກືນເບັດ
ທັງຖືກມັດດ້ວຍບ້ວງຄືກິເລດ ຄືທ້າວເວປະຈິດຕິອະສູນຖືກມັດດ້ວຍບ້ວງ ຂອງ
ທ້າວສັກກະຈອມເທບ

[ກ໕໐] ເຮົາດຶງບ້ວງຄືກິເລດນັ້ນບໍ່ລຸດ
ຈຶ່ງບໍ່ພົ້ນໄປຈາກຄວາມໂສກເສົ້າແລະຄວາມຮ້ອນຮົນຮ່ຳໄຮນັ້ນ
ໃຜໃນໂລກນີ້ຈະຊ່ອຍແກ້ເຄື່ອງມັດຄືກິເລດ
ປະກາດທາງຕັດສະຣູ້ໃຫ້ເຮົາໄດ້

[ກ໕໑] ເຮົາຈະປະຕິບັດຕາມທຳຂອງໃຜຄືສະມະນະ
ຫຼືພາມຫຼືໃຜຜູ້ສະແດງທຳເປັນເຫດກຳຈັດກິເລດ
ທີ່ຈະລອຍຊະຣາແລະມໍລະນະໄດ້

[ກ໕໒] ຈິດຂອງເຮົາຖືກຮ້ອຍໄວ້ດ້ວຍຄວາມລັງເລສົງໄສ
ປະກອບດ້ວຍຄວາມແຂ່ງດີມີກຳລັງ ເຖິງຄວາມກະດ້າງ
ຍ້ອນໃຈປະກອບດ້ວຍຄວາມໂກດ ຖືກຄວາມໂລບຖ້າທຳລາຍ

[ກ໕໓] ເຊີນທ່ານເບິ່ງລູກສອນຄືທິດຖິ ໓໐ ປະເພດ
ອັນມີທະນູຄືຕັນຫາເປັນສະມຸດຖານເນື່ອງຢູ່ໃນເອິກ
ມີກຳລັງທຳລາຍທະໄທຢູ່ເທີ້ນ

[ກ໕໔] ການບໍ່ລະທິດຖິທີ່ເຫຼືອ໌ເປັນອັນຖືກລູກສອນ
ຄືຄວາມດຳຣິຜິດໃຫ້ອາດທານ
ເຮົາຖືກຍິງດ້ວຍລູກສອນຄືທິດຖິນັ້ນຫວັ່ນໄຫວຢູ່
ຄືໃບໄມ້ໄຫວຍ້ອນຕ້ອງລົມ

[ກ໕໕] ບາບກຳຕັ້ງຂຶ້ນພາຍໃນເຮົາ ແລ້ວໃຫ້ຜົນ
ເປັນໄປໃນຮ່າງກາຍທີ່ມີຜັດສາຍະຕະນະ໖ ທຸກເມື່ອ

[ກ໕໖] ເຮົາຍັງບໍ່ພົ້ນທີ່ຈະຊ່ອຍຖອນລູກສອນ໌ຂອງເຮົານັ້ນໄດ້ເລີຍ
ທັງໝົດນັ້ນກໍບໍ່ສາມາດໃຊ້ເຄື່ອງມືແພດຕ່າງ ໆ
ອາວຸດ ເວດມົນ ແລະຢາອື່ນ ໆ ຖອນລູກສອນນັ້ນໄດ້

[໗໕໗] ໃຜນໍບໍ່ຕ້ອງໃຊ້ອາວຸດ ບໍ່ເຮັດຮ່າງກາຍໃຫ້ເປັນບາດ
ບໍ່ບຽດບຽນຮ່າງກາຍທຸກສ່ວນ ຈັກຖອນລູກສອນຄືກິເລດ
ເຊິ່ງເປັນລູກສອນໂດຍປະຣະມັດຖ໌ທີ່ສຽບຢູ່ພາຍໃນຫະໄທຂອງເຮົາອອກໄດ້

[໗໕໘] ຜູ້ລອຍໂທດທີ່ເປັນພິດ(ຄືກິເລດມີຣາຄະເປັນຕົ້ນ)ໄດ້
ຈັດວ່າເປັນໃຫຍ່ໃນທຳ ປະເສີດສຸດແທ້
ຊ່ອຍຊີ້ມີ(ຄືອະຣິຍະມັກ) ບອກເທິງບົກ(ຄືນິບພານ)
ໃຫ້ແກ່ເຮົາຜູ້ຕົກແມ່ນ້ຳໃຫຍ່ ຄືສົງສານທີ່ເລິກ

[໗໕໙] ເຮົາໄດ້ຈົມລົງໃນແມ່ນ້ຳໃຫຍ່ຄືສົງສານ
ເຊິ່ງມີດິນໜຽວຄືທຸລິມີຣາຄະເປັນຕົ້ນທີ່ບໍ່ສາມາດຈະນຳອອກໄດ້
ເປັນທີ່ແຜ່ໄປແຫ່ງມາຍາຄວາມຣິດສະຫຍາ ຄວາມແຂ່ງດີ
ແລະຄວາມງ້ວງເຫງົາຫາວນອນ

[໗໖໐] ຄວາມດຳຣິທັງຫຼາຍທີ່ອາໄສຣາຄະ ເປັນຄືແມ່ນ້ຳໃຫຍ່
ມີອຸດທັດຈະເປັນກ້ອນເຝືອຄຳຣິນ ມີກ້ອນເຝືອໝອກຄືສັງໂຍດ ໑໐
ຍ່ອມນຳເຮົາຜູ້ມີຄວາມເຫັນຜິດໄປ

[໗໖໑] ກະແສຕັນຫາໄຫຼໄປໃນອາລົມທັງປວງ
ທັງຕັນຫາດັ່ງເຄືອເຂົາກໍປົ່ງຂຶ້ນ
ໃຜຈະເພິ່ງກັ້ນກະແສຕັນຫາເຫຼົ່ານັ້ນໄດ້
ໃຜນໍຈັກຕັດຕັນຫາດັ່ງເຄືອເຂົານັ້ນໄດ້

[໗໖໒] ທ່ານຜູ້ຈະເລີນທັງຫຼາຍ ເຊີນທ່ານທັງຫຼາຍເຮັດເຂື່ອນອັນເປັນເຄື່ອງກັ້ນກະແສ
ຕັນຫາສາ ຢ່າໃຫ້ກະແສຕັນຫາທີ່ເກີດແຕ່ໃຈພັດພາທ່ານ
ທັງຫຼາຍໄປທັນທີດັ່ງກະແສນ້ຳພັດພາຕົ້ນໄມ້ທີ່ຢູ່ແຄມຝັ່ງໄປ

[໗໖໓] ພຣະສາດສະດາຊົງມີພຣະປັນຍາເປັນອາວຸດ
ອັນໝູ່ລືສີອາໄສແລ້ວ ເປັນບ່ອນເພິ່ງສຳລັບເຮົາຜູ້ມີໄພ
ກຳລັງສະແຫວງຫາຝັ່ງຄືນິບພານຈາກທີ່ບໍ່ແມ່ນຝັ່ງໄດ້ແນວນີ້

[໗໖໔] ພຣະອົງໄດ້ຊົງປະທານຂັ້ນໄດ ທີ່ນາຍຊ່າງເຮັດດີແລ້ວ ບໍລິສຸດ
ເຮັດດ້ວຍໄມ້ແກ່ນຄືທຳອັນໝັ້ນຄົງ

ແກ່ເຮົາຜູ້ກຳລັງຖືກກະແສແມ່ນ້ຳ(ຄືຕັນຫາ)ພັດໄປ
ແລະຮັບສັ່ງວ່າ ຢ່າຢ້ານເລີຍ

[໗໒໔] ເຮົາໄດ້ຂຶ້ນຜາສາດຄືສະຕິປັດຖານ
ພິຈາລະນາເຫັນໝູ່ສັດຜູ້ຍິນດີໃນຮ່າງກາຍຂອງຕົນ
ທີ່ເຮົາຈັກໄດ້ຮູ້ໃນການກ່ອນໂດຍເປັນແກ່ນສານ

[໗໒໕] ເມື່ອເວລາທີ່ເຮົາໄດ້ເຫັນທາງ (ຄືວິປັດສະນາ)
ເຊິ່ງເປັນອຸບາຍສຳລັບຂຶ້ນເຮືອ (ຄືອະຣິຍະມັກ)
ແລ້ວບໍ່ຢຶດຖືວ່າເປັນໂຕຕົນ ຈຶ່ງໄດ້ເຫັນທ່າທີ່ດີຢ້ຽມ[១]

[໗໒໗] ພຣະສຳມາສຳພຸດທະເຈົ້າ ໄດ້ຊົງສະແດງທາງອັນປະເສີດ
ເພື່ອບໍ່ໃຫ້ເປັນໄປແຫ່ງບາບທຳຄືທິດຖິແລະມານະເປັນຕົ້ນ
ເຊິ່ງປຽບຄືລູກສອນເກີດແຕ່ຕົນ ທັງເກີດແຕ່ຕັນຫາທີ່ນຳໄປສູ່ພົບໄດ້

[໗໒໘] ພຣະສຳມາສຳພຸດທະເຈົ້າຊົງກຳຈັດໂທດທີ່ເປັນພິດ
ໄດ້ຊົງຊ່ອຍບັນເທົາກິເລດເຄື່ອງຮ້ອຍຮັດຂອງເຮົາທີ່ນອນເນື່ອງຢູ່ໃນສັນດານ
ຄອບງຳສັນດານຢູ່ມາເປັນເວລາດົນ

## ໔. ຣັດຖະປາລະເຖຣະຄາຖາ

### ພາສິດຂອງພຣະຣັດຖະປາລະເຖຣະ

(ພຣະຣັດຖະປາລະເຖຣະໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໗໒໙] ຂໍເຊີນແມ່ອອກພໍ່ອອກເບິ່ງອັດຕະພາບ
ທີ່ຜ້າແລະອາພອນເປັນຕົ້ນ ເຮັດໃຫ້ວິຈິດ
ມີກາຍເປັນບາດ ມີກະດູກ ໓໐໐ ທ່ອນເປັນໂຄງຮ່າງ
ກະສັບກະສ່າຍທີ່ພວກຄົນຈົ້າດຳຣິຫວັງກັນສ່ວນຫຼາຍ
ເຊິ່ງບໍ່ມີຄວາມໝັ້ນຍືນຕັ້ງໝັ້ນ

[໗໓໐] ຂໍເຊີນແມ່ອອກພໍ່ອອກເບິ່ງຮູບທີ່ສະຕິໃຊ້ແກ້ວມະນີແລະຕຸ້ມຫູ
ແຕ່ງໃຫ້ວິຈິດ ເຊິ່ງມີໜັງຫຸ້ມກະດູກໄວ້ພາຍໃນ ງາມພ້ອມເສື້ອຜ້າ

[ຄາ໑]	ຕີນທັງສອງຍ້ອມດ້ວຍຄັ່ງສີດ ໜ້າທາດ້ວຍຈຸນ
ກໍສາມາດເຮັດຄົນຈ້ຳໃຫ້ລຸ້ມຫຼົງ
ແຕ່ບໍ່ສາມາດເຮັດຄົນທີ່ສະແຫວງຫາຝັ່ງຄືນິບພານໃຫ້ລຸ້ມຫຼົງໄດ້

[ຄາ໔]	ຜົມທີ່ຕົບແຕ່ງໃຫ້ເປັນລອນດັ່ງກະດານໝາກຣຸກ
ຕາທັງສອງທີ່ຢອດດ້ວຍຢາຢອດຕາກໍສາມາດເຮັດຄົນຈ້ຳໃຫ້ລຸ້ມຫຼົງ
ແຕ່ບໍ່ສາມາດເຮັດຄົນທີ່ສະແຫວງຫາຝັ່ງຄືນິບພານໃຫ້ລຸ້ມຫຼົງໄດ້

[ຄາ໖]	ກາຍທີ່ມີສະພາບເປື່ອຍເນົ່າເປັນທຳມະດາເຊິ່ງຕົບແຕ່ງແລ້ວ
ຄືກັບຢາຢອດຕາໃໝ່ ໆ ທີ່ງົດງາມ
ກໍສາມາດເຮັດຄົນຈ້ຳໃຫ້ລຸ້ມຫຼົງ
ແຕ່ບໍ່ສາມາດເຮັດຄົນທີ່ສະແຫວງຫາຝັ່ງຄືນິບພານໃຫ້ລຸ້ມຫຼົງໄດ້

[ຄາ໔]	ນາຍພານເນື້ອດັກບ້ວງໄວ້ແລ້ວ ເນື້ອບໍ່ມາຕິດບ້ວງ
ເຮົາທັງຫຼາຍ(ໝູ່ເນື້ອ)ກິນເຫຍື່ອແລ້ວຫຼົບໜີໄປ
ເມື່ອນາຍພານກຳລັງຮ່ຳໄຮຢູ່

[ຄາ໕]	ເຮົາທັງຫຼາຍກັດບ້ວງຂອງນາຍພານເນື້ອຂາດແລ້ວ ເນື້ອບໍ່ຕິດບ້ວງ
ເຮົາກິນເຫຍື່ອແລ້ວຫຼົບໜີໄປ ເມື່ອນາຍພານເນື້ອກຳລັງເສົ້າໂສກຢູ່

[ຄາ໖]	ອາດຕະມາເຫັນຜູ້ຄົນທີ່ມີຊັບໃນໂລກ ໄດ້ຊັບເຄື່ອງພໍໃຈແລ້ວ ບໍ່ຍອມໃຫ້(ໃຜ)
ຍ້ອນຄວາມຫຼົງ
ໄດ້ຊັບແລ້ວ ເກັບສະສົມໄວ້ ແລະປາຖະໜາກາມມະຄຸນຍິ່ງ ໆ ຂຶ້ນໄປ

[ຄາ໗]	ພຣະຣາຊາຊົງຂົ່ມເຫັງ ເວລາຊົງເອົາແຜ່ນດິນ
ຊົງຄອບຄອງແຜ່ນດິນເຊິ່ງມີສະມຸດສາຄອນອ້ອມຮອບ
ຕະຫຼອດສະມຸດສາຄອນຝັ່ງນີ້ ຍັງບໍ່ຊົງພໍ
ຍັງຊົງປາຖະໜາຈະຄອບຄອງສະມຸດສາຄອນຝັ່ງນັ້ນອີກ

[ຄາ໘]	ທັງພຣະຣາຊາແລະຄົນອື່ນເປັນຈຳນວນຫຼາຍທີ່ຍັງບໍ່ປາສະຈາກຕັນຫາ
ເຂົ້າເຖິງຄວາມຕາຍ ຍັງບໍ່ເຕັມຕາມທີ່ຕ້ອງການເລີຍ
ກໍລະຖິ້ມຮ່າງກາຍໄປ ຍ້ອນຄວາມອິ່ມດ້ວຍການບໍ່ມີໃນໂລກ

[໑໗໙] ໝູ່ຍາດພາກັນຊະເຜີນ ຮ່ຳໄຮເຖິງຄົນທີ່ຕາຍນັ້ນແລະເວົ້າວ່າ
ເຮັດແນວໃດນໍ ພວກຍາດຂອງເຮົາທັງຫຼາຍຈຶ່ງຈະບໍ່ຕາຍ
ແຕ່ນັ້ນກໍນຳສົບນັ້ນເຊິ່ງຫໍ່ຜ້າໄວ້ແລ້ວຍົກຂຶ້ນສູ່ກອງຟອນແລ້ວຊ່ອຍກັນເຜົາ

[໑໘໐] ສົບນັ້ນຖືກເຂົາໃຊ້ຫຼາວແທງເຜົາຢູ່ ລະໂພຄະຊັບ ມີແຕ່ຜ້າຜືນດຽວ
ເມື່ອຄົນຈະຕາຍ ຍາດ ມິດ ຫຼືສະຫາຍກໍຊ່ອຍບໍ່ໄດ້

[໑໘໑] ທາຍາດທັງຫຼາຍກໍຂົນຊັບສົມບັດຂອງເຂົາໄປ
ສ່ວນສັດທີ່ຕາຍໄປກໍຍ່ອມໄປຕາມກຳ
ເມື່ອຕາຍໄປ ຊັບໃດ ໆ ຄື ບຸດ ພັນລະຍາ ເຂົ້າຂອງ ເງິນຄຳ
ແລະແວ່ນແຄວ້ນກໍຕິດຕາມໄປບໍ່ໄດ້

[໑໘໒] ຊັບຊ່ອຍຄົນໃຫ້ມີອາຍຸຍືນບໍ່ໄດ້
ທັງຊ່ອຍຄົນໃຫ້ລະຄວາມແກ່ກໍບໍ່ໄດ້
ນັກປາດທັງຫຼາຍກ່າວຊີວິດນັ້ນວ່າໜ້ອຍແທ້
ບໍ່ໝັ້ນຍືນ ມີຄວາມແປປ່ຽນໄປເປັນທຳມະດາ

[໑໘໓] ທັງຄົນຮັ່ງມີ ທັງຄົນທຸກຍາກກໍຍ່ອມປະສົບເຊັ່ນນັ້ນ
ທັງພານແລະບັນດິດກໍປະສົບຄືກັນທັງນັ້ນ
ຄົນພານນັ້ນແລຖືກເຫດແຫ່ງທຸກກະທົບເຂົ້າ
ຍ່ອມຫວັ່ນໄຫວຍ້ອນຄວາມເປັນຄົນໂງ່
ສ່ວນບັນດິດຖືກຕ້ອງກໍບໍ່ຫວັ່ນໄຫວ

[໑໘໔] ຍ້ອນເຫດນັ້ນແລ ປັນຍາທີ່ນັ້ນເປັນເຫດບັນລຸນິບພານ
ເຊິ່ງເປັນບ່ອນສຸດແຫ່ງພົບໃນໂລກນີ້ ຈຶ່ງປະເສີດກວ່າຊັບ
ກໍຍ້ອນຍັງບໍ່ໄດ້ບັນລຸບ່ອນສຸດຄົນພານທັງຫຼາຍຈຶ່ງເຮັດແຕ່ກຳຊົ່ວໃນພົບ ນ້ອຍພົບໃຫຍ່ຍ້ອນຄວາມຈົ໊າ

[໑໘໕] ຜູ້ທີ່ເຮັດກຳຊົ່ວ ຕ້ອງວຽນວ່າຍຕາຍເກີດຢູ່ໃນສັງສາຣະວັດບໍ່ສິ້ນສຸດ
ຄົນມີປັນຍາໜ້ອຍ ເມື່ອເຊື່ອຄົນທີ່ເຮັດກຳຊົ່ວນັ້ນ
ກໍຍ່ອມວຽນວ່າຍຕາຍເກີດບໍ່ສິ້ນສຸດ

[໑໘໖] ໂຈນຜູ້ເຮັດກຳຖືກເຂົາຈັບໄດ້ຢູ່ທາງ ໓ ແຍກ
ຍ່ອມເດືອດຮ້ອນຍ້ອນກຳຂອງຕົນ ສັນໃດ

ໝູ່ສັດຜູ້ເຮັດກຳຊົ່ວ ຕາຍໄປແລ້ວ ຍ່ອມເດືອດຮ້ອນໃນໂລກໜ້າ
ຍ້ອນກຳຂອງຕົນ ສັນນັ້ນ

[໗໘]    ຍ້ອນການທັງຫຼາຍທີ່ງົດງາມໜ້າປາຖະໜາຊວນໃຫ້ອອນຊອນໃຈ
ຍ່ອມຍ່ຳຍີຈິດໂດຍສະພາວະຕ່າງ ໆ ສັນນັ້ນ
ອາດຕະມາເຫັນໂທດໃນການມະຄຸນທັງຫຼາຍ ຈຶ່ງໄດ້ບວດ ມະຫາບໍພິດ

[໗໙]    ສັດທັງຫຼາຍທັງໜຸ່ມທັງແກ່ ພໍຮ່າງແຕກສະຫຼາຍກໍຫຼົ່ນລົງ
ຄືໝາກໄມ້ສຸກງອມຕົກຫຼົ່ນລົງ
ມະຫາບໍພິດ ອາດຕະມາເຫັນຄວາມບໍ່ທ່ຽງແມ່ນນີ້ ຈຶ່ງໄດ້ບວດ
ຄວາມເປັນສະມະນະທີ່ປະຕິບັດບໍ່ຜິດນັ້ນແລ ປະເສີດກວ່າ

[໗໙]    ອາດຕະມາບວດດ້ວຍສັດທາໄດ້ປະຕິບັດຖືກ
ໃນພຣະສາດສະໜາຂອງພຣະຊິນນະເຈົ້າ
ການບວດຂອງອາດຕະມາບໍ່ມີໂທດ
ອາດຕະມາສັນອາຫານຢ່າງບໍ່ເປັນໜີ້

[໘໐]    ພິຈາລະນາເຫັນການທັງຫຼາຍໂດຍຄວາມເປັນຂອງຮ້ອນ
ເງິນຄຳໂດຍຄວາມເປັນອາວຸດ ທຸກຕັ້ງແຕ່ຖືປະຕິສົນທິໃນທ້ອງ
ແລະໄພໃຫຍ່ໃນນະຮົກ

[໘໑]    ເມື່ອເຫັນໂທດນີ້ແລ້ວ ຈຶ່ງໄດ້ຄວາມສັງເວດໃນຄັ້ງນັ້ນ
ໃນເວລານັ້ນ ອາດຕະມານັ້ນເປັນຜູ້ຖືກລູກສອນຄືຣາຄະເປັນຕົ້ນສຽບແທງຢູ່
ບັດນີ້ເຖິງຄວາມສິ້ນອາສະວະແລ້ວ

[໘໔]    ອາດຕະມາປົນນິບັດພຣະສາດສະດາ
ໄດ້ເຮັດຕາມຄຳສັ່ງສອນຂອງພຣະພຸດທະເຈົ້າແລ້ວ ປົງພາຣະທີ່ໜັກໄດ້
ຖອນຕັນຫາທີ່ນຳໄປສູ່ພົບໄດ້ຂາດແລ້ວ

[໘໓]    ອາດຕະມາອອກບວດເປັນບັນພະຊິດເພື່ອປະໂຫຍດໃດ
ປະໂຫຍດນັ້ນອັນເປັນທີ່ສິ້ນສຸດໄປແຫ່ງສັງໂຍດທັງປວງ
ອາດຕະມາກໍໄດ້ບັນລຸແລ້ວ

# ໕. ມາລຸງກະຍະປຸດຕະເຖຣະຄາຖາ

## ພາສິດຂອງພຣະມາລຸງກະຍະບຸດເຖຣະ

(ພຣະມາລຸງກະຍະບຸດເຖຣະໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໗໙໔] ເມື່ອເຫັນຮູບ ມົວໃສ່ໃຈເຖິງອາລົມອັນເປັນທີ່ຮັກຢູ່
ຍ່ອມຫຼົງລືມສະຕິໄດ້
ຜູ້ທີ່ມີຈິດກຳໜັດຫຼາຍຍັງສະເຫວີຍຮູບອາລົມຢູ່

[໗໙໕] ເວທະນາຕ່າງ ໆ ເຊິ່ງມີຮູບເປັນອາລົມ ຍ່ອມຈະເລີນແກ່ເຂົາ
ອະພິດຊາ[໑] ແລະວິຫິງສາ[໒] ຍ່ອມບຽດບຽນຈິດຂອງເຂົາ
ຍ້ອນສັ່ງສົມແນວນີ້ ທຸກຍ່ອມເປັນໄປ
ທ່ານກ່າວວ່າຍັງຫ່າງໄກນິບພານ

[໗໙໖] ເມື່ອຟັງສຽງແລ້ວ ມົວໃສ່ໃຈເຖິງອາລົມອັນເປັນທີ່ຮັກຢູ່
ຍ່ອມຫຼົງລືມສະຕິໄດ້
ຜູ້ທີ່ມີຈິດກຳໜັດຫຼາຍ ຍັງສະເຫວີຍສັດທາຣົມຢູ່
ສັດທາຣົມນັ້ນຍ່ອມຜູກພັນເຂົາໄວ້

[໗໙໗] ເວທະນາຕ່າງ ໆ ເຊິ່ງມີສຽງເປັນອາລົມ ຍ່ອມຈະເລີນແກ່ເຂົາ
ອະພິດຊາ ແລະວິຫິງສາ ຍ່ອມບຽດບຽນຈິດຂອງເຂົາ
ຍ້ອນສັ່ງສົມແນວນີ້ ທຸກຍ່ອມເປັນໄປ
ທ່ານກ່າວວ່າຍັງຫ່າງໄກນິບພານ

[໗໙໘] ເມື່ອບຸກຄົນດົມກິ່ນແລ້ວ ໃສ່ໃຈວ່າເປັນນິມິດທີ່ໜ້າຍິນດີ
ກໍເປັນອັນຫຼົງລືມສະຕິ
ກໍເມື່ອເປັນແນວນັ້ນ ເຂົາມີຈິດກຳໜັດຫຼາຍ
ເພີດເພີນ ແລະຕິດຄັນທາຣົມນັ້ນຢູ່

[໗໙໙] ເວທະນາຕ່າງ ໆ ເຊິ່ງມີກິ່ນເປັນອາລົມ ຍ່ອມຈະເລີນແກ່ເຂົາ
ອະພິດຊາ ແລະວິຫິງສາ ຍ່ອມບຽດບຽນຈິດຂອງເຂົາ
ຍ້ອນສັ່ງສົມແນວນີ້ ທຸກຍ່ອມເປັນໄປ
ທ່ານກ່າວວ່າ ຍັງຫ່າງໄກນິບພານ

[໗໐໐] ເມື່ອບຸກຄົນຊີມຣົດແລ້ວ ໃສ່ໃຈວ່າເປັນນິມິດທີ່ແຊບ
ກໍເປັນອັນຫຼົງລືມສະຕິ
ກໍເມື່ອເປັນແນວນັ້ນ ເຂົາມີຈິດກຳໜັດຫຼາຍ
ເພີດເພີນ ແລະຕິດຣະສາຣົມນັ້ນຢູ່

[໗໐໑] ເວທະນາຕ່າງ ໆ ເຊິ່ງມີຣົດເປັນອາລົມ ຍ່ອມຈະເລີນແກ່ເຂົາ
ອະພິດຊາ ແລະວິຫິງສາ ຍ່ອມບຽດບຽນຈິດຂອງເຂົາ
ຍ້ອນສັ່ງສົມແນວນີ້ ທຸກຍ່ອມເປັນໄປ
ທ່ານກ່າວວ່າຍັງຫ່າງໄກນິບພານ

[໗໐໒] ເມື່ອບຸກຄົນຖືກຕ້ອງໂຜດຖັບພະແລ້ວ ໃສ່ໃຈວ່າເປັນນິມິດທີ່ໜ້າຕິດໃຈ
ກໍເປັນອັນຫຼົງລືມສະຕິ
ກໍເມື່ອເປັນແນວນັ້ນ ເຂົາມີຈິດກຳໜັດຫຼາຍ
ເພີດເພີນ ແລະຕິດໂຜດຖັບພາຣົມນັ້ນຢູ່

[໗໐໓] ເວທະນາຕ່າງ ໆ ເຊິ່ງມີຜັດສະເປັນອາລົມ ຍ່ອມຈະເລີນແກ່ເຂົາ
ອະພິດຊາ ແລະວິຫິງສາ ຍ່ອມບຽດບຽນຈິດຂອງເຂົາ
ຍ້ອນສັ່ງສົມແນວນີ້ ທຸກຍ່ອມເປັນໄປ
ທ່ານກ່າວວ່າ ຍັງຫ່າງໄກນິບພານ

[໗໐໔] ເມື່ອບຸກຄົນຮູ້ທຳມາຣົມແລ້ວ
ໃສ່ໃຈວ່າເປັນນິມິດທີ່ໜ້າເພີດເພີນ
ກໍເປັນອັນຫຼົງລືມສະຕິ
ກໍເມື່ອເປັນແນວນັ້ນ ເຂົາມີຈິດກຳໜັດຫຼາຍ
ເພີດເພີນ ແລະຕິດທຳມາຣົມນັ້ນຢູ່

[໗໐໕] ເວທະນາຕ່າງ ໆ ເຊິ່ງມີທຳມາຣົມເປັນເຫດ ຍ່ອມຈະເລີນແກ່ເຂົາ ອະພິດຊາ
ແລະວິຫິງສາ ຍ່ອມບຽດບຽນຈິດຂອງເຂົາ
ຍ້ອນສັ່ງສົມແນວນີ້ ທຸກຍ່ອມເປັນໄປ
ທ່ານກ່າວວ່າຍັງຫ່າງໄກນິບພານ

[໗໐໖] ຜູ້ທີ່ເຫັນຮູບແລ້ວ ມີສະຕິຢູ່ສະເພາະໜ້າ
ບໍ່ກຳໜັດຍິນດີໃນຮູບ ມີຈິດຄາຍຄວາມກຳໜັດ
ຮູ້ແຈ້ງຮູບອາຣົມນັ້ນ ແລະບໍ່ຕິດຮູບອາຣົມນັ້ນຢູ່

[໘໐໗]	ເມື່ອພຣະໂຍຄີນັ້ນພິຈາລະນາເຫັນຮູບ
ໂດຍຄວາມເປັນຂອງບໍ່ທ່ຽງເປັນຕົ້ນ
ຫຼືແມ່ນສະເຫວີຍເວທະນາໂດຍທີ່ກິເລດມີອະພິດຊາເປັນຕົ້ນ ເປັນໄປບໍ່ໄດ້ ກິເລດວັດຕະຍ່ອມສິ້ນໄປ ຍ່ອມກໍ່ຮາກຂຶ້ນບໍ່ໄດ້ສັນໃດ
ທ່ານມີສະຕິປະພຶດຢູ່ແນວນີ້ກໍສັນນັ້ນ
ເມື່ອບໍ່ກໍ່ວັດຕະທຸກແນວນີ້ ທ່ານກ່າວວ່າຢູ່ໃກ້ນິບພານ

[໘໐໘]	ຜູ້ທີ່ຟັງສຽງແລ້ວ ມີສະຕິຢູ່ສະເພາະໜ້າ
ບໍ່ກຳໜັດຍິນດີໃນສຽງ
ມີຈິດຄາຍຄວາມກຳໜັດ
ຮູ້ແຈ້ງສັດທາຣົມນັ້ນ ແລະບໍ່ຕິດສັດທາຣົມນັ້ນຢູ່

[໘໐໙]	ເມື່ອພຣະໂຍຄີນັ້ນ ຟັງສຽງ ຫຼືແມ່ນສະເຫວີຍເວທະນາ
ໂດຍທີ່ກິເລດມີອະພິດຊາເປັນຕົ້ນ ເປັນໄປບໍ່ໄດ້
ກິເລດວັດຕະ ຍ່ອມສິ້ນໄປ ຍ່ອມກໍ່ຮາກຂຶ້ນບໍ່ໄດ້
ທ່ານມີສະຕິປະພຶດຢູ່ແນວນີ້ ເມື່ອບໍ່ກໍ່ວັດຕະທຸກແນວນີ້
ທ່ານກ່າວວ່າ ຢູ່ໃກ້ນິບພານ

[໘໑໐]	ຜູ້ທີ່ດົມກິ່ນແລ້ວ ມີສະຕິຢູ່ສະເພາະໜ້າ
ບໍ່ກຳໜັດຍິນດີໃນກິ່ນ ມີຈິດຄາຍຄວາມກຳໜັດ
ຮູ້ແຈ້ງຄັນທາຣົມນັ້ນ ແລະບໍ່ຕິດຄັນທາຣົມນັ້ນຢູ່

[໘໑໑]	ເມື່ອພຣະໂຍຄີນັ້ນ ດົມກິ່ນ ຫຼືແມ່ນສະເຫວີຍເວທະນາ
ໂດຍທີ່ກິເລດມີອະພິດຊາເປັນຕົ້ນ ເປັນໄປບໍ່ໄດ້
ກິເລດວັດຕະ ຍ່ອມສິ້ນໄປ ຍ່ອມກໍ່ຮາກຂຶ້ນບໍ່ໄດ້
ທ່ານມີສະຕິປະພຶດຢູ່ແນວນີ້ ເມື່ອບໍ່ກໍ່ວັດຕະທຸກແນວນີ້
ທ່ານກ່າວວ່າ ຢູ່ໃກ້ນິບພານ

[໘໑໒]	ຜູ້ທີ່ຊີມຣົດແລ້ວ ມີສະຕິຢູ່ສະເພາະໜ້າ
ບໍ່ກຳໜັດຍິນດີໃນຣົດ ມີຈິດຄາຍຄວາມກຳໜັດ
ຮູ້ແຈ້ງຣະສາຣົມນັ້ນ ແລະບໍ່ຕິດຣະສາຣົມນັ້ນຢູ່

[໘໑໓]	ເມື່ອພຣະໂຍຄີນັ້ນຊີມຣົດ ຫຼືແມ່ນສະເຫວີຍເວທະນາ
ໂດຍທີ່ກິເລດມີອະພິດຊາເປັນຕົ້ນ ເປັນໄປບໍ່ໄດ້

ກິເລດວັດຕະຍ່ອມສິ້ນໄປ ຍ່ອມກໍ່ຮາກຂຶ້ນບໍ່ໄດ້
ທ່ານມີສະຕິປະພຶດຢູ່ແນວນີ້ ເມື່ອບໍ່ກໍ່ວັດຕະທຸກແນວນີ້
ທ່ານກ່າວວ່າຢູ່ໃກ້ນິບພານ

[໗໑໔] ຜູ້ທີ່ຖືກຕ້ອງໂຜດຖັບພະແລ້ວ ມີສະຕິຢູ່ສະເພາະໜ້າ
ບໍ່ກຳໜັດຍິນດີໃນໂຜດຖັບພະ ມີຈິດຄາຍຄວາມກຳໜັດ
ຮູ້ແຈ້ງໂຜດຖັບພາຣົມນັ້ນ ແລະບໍ່ຕິດໂຜດຖັບພາຣົມນັ້ນຢູ່

[໗໑໕] ເມື່ອພຣະໂຍຄີນັ້ນ ຖືກຕ້ອງໂຜດຖັບພະ ຫຼືແມ່ນສະເຫວີຍເວທະນາ
ໂດຍທີ່ກິເລດມີອະພິດຊາເປັນຕົ້ນເປັນໄປບໍ່ໄດ້
ກິເລດວັດຕະຍ່ອມສິ້ນໄປ ຍ່ອມກໍ່ຮາກຂຶ້ນບໍ່ໄດ້
ທ່ານມີສະຕິປະພຶດຢູ່ແນວນີ້ ເມື່ອບໍ່ກໍ່ວັດຕະທຸກແນວນີ້
ທ່ານກ່າວວ່າຢູ່ໃກ້ນິບພານ

[໗໑໖] ຜູ້ທີ່ຮູ້ທຳມາຣົມແລ້ວ ມີສະຕິຢູ່ສະເພາະໜ້າ
ບໍ່ກຳໜັດຍິນດີໃນທຳມາຣົມ
ມີຈິດຄາຍຄວາມກຳໜັດ ຮູ້ແຈ້ງທຳມາຣົມນັ້ນ
ແລະບໍ່ຕິດທຳມາຣົມນັ້ນຢູ່

[໗໑໗] ເມື່ອພຣະໂຍຄີນັ້ນ ຮູ້ແຈ້ງທຳມາຣົມຫຼືແມ່ນສະເຫວີຍເວທະນາ
ໂດຍທີ່ກິເລດມີອະພິດຊາເປັນຕົ້ນ ເປັນໄປບໍ່ໄດ້
ກິເລດວັດຕະຍ່ອມສິ້ນໄປ ຍ່ອມກໍ່ຮາກຂຶ້ນບໍ່ໄດ້
ທ່ານມີສະຕິປະພຶດຢູ່ແນວນີ້ ເມື່ອບໍ່ກໍ່ວັດຕະທຸກແນວນີ້
ທ່ານກ່າວວ່າຢູ່ໃກ້ນິບພານ

## ໖. ເສລະເຖຣະຄາຖາ

### ພາສິດຂອງພຣະເສລະເຖຣະ

(ພຣະເສລະເຖຣະ ຄັ້ງເປັນຄະລືຫັດ ໄດ້ສະດຸດີພຣະຜູ້ມີພຣະພາກເຈົ້າດ້ວຍພາສິດ ໖ ພາສິດວ່າ)

[໗໑໘] ຂ້າແດ່ພຣະຜູ້ມີພຣະພາກເຈົ້າ ພຣະອົງສະເດັດອຸບັດມາດີແລ້ວ
ຊົງມີພຣະວິຣິຍະພາບ ມີພຣະວໍຣະກາຍສົມບູນ

ມີພຣະຣັດສະໝີທີ່ຊ່ານອອກຈາກພຣະວໍຣະກາຍງົດງາມ
ສວຍງາມໜ້າທັດສະນາຍິ່ງ
ພຣະສະຫວີວັນຜຸດຜ່ອງດັ່ງຄຳ ພຣະແຂ້ວແກ້ວທັງຊ້າຍຂວາກໍສຸກໃສ

[໗໑໙] ຍ້ອນພຣະລັກສະນະແຫ່ງມະຫາບຸຣຸດ
ທີ່ມີຜາກົດແກ່ມະຫາບຸຣຸດນັ້ນ
ຍ່ອມມີຜາກົດໃນພຣະວໍຣະກາຍຂອງພຣະອົງຢ່າງຄົບຖ້ວນ

[໗໒໐] ພຣະອົງມີພຣະເນດແຈ່ມໃສ ພຣະພັກຜຸດຜ່ອງ
ພຣະວໍຣະກາຍສູງໃຫຍ່ກົງ
ມີພຣະອຳນາດ ຊົງຮຸ່ງເຮືອງທ່າມກາງໝູ່ສະມະນະ
ຄືດວງອາທິດຮຸ່ງເຮືອງຢູ່

[໗໒໑] ພຣະອົງເປັນພິກຂຸ ມີພຣະຄຸນສົມບັດງົດງາມໜ້າຊົມ
ມີພຣະສະຫວີວັນນະ ຜຸດຜ່ອງດັ່ງຄຳ
ພຣະອົງຊົງມີວັນນະສູງສົ່ງເຖິງພຽງນີ້ ຈະເປັນສະມະນະໄປເຮັດຫຍັງ

[໗໒໒] ພຣະອົງຄວນເປັນພຣະເຈົ້າຈັກກະພັດ ທີ່ອົງອາດໃນໝູ່ພົນລົດ
ຊົງປາບປາມໄພຣີຊະນະ ຊົງເປັນໃຫຍ່ໃນພາກພື້ນຊົມພູທະວີບ
ເຊິ່ງມີສະມຸດສາຄອນທັງສີ່ເປັນຂອບເຂດ

[໗໒໓] ຂ້າແດ່ພຣະໂຄດົມ ຂໍເຊີນພຣະອົງຂຶ້ນຄອງຣາດ
ເປັນພຣະເຈົ້າຈັກກະພັດຈອມມະນຸດຕາມພຣະຣາດຊະປະເພນີ
ທີ່ກະສັດຕາທິຣາດໂດຍພຣະຊາດໄດ້ສະເຫວີຍຣາດ
ມີໝູ່ສະເວກາມາດສະເດັດຕາມພຣະອົງເທີ້ນ

(ພຣະຜູ້ມີພຣະພາກເຈົ້າຕັດພຣະພຸດທະພາສິດນີ້ວ່າ)

[໗໒໔] ເສລະພາມ ເຮົາເປັນພຣະຣາຊາຢູ່ແລ້ວ
ຄືເປັນພຣະທຳມະຣາຊາຜູ້ປະເສີດ
ຍັງທຳມະຈັກທີ່ບໍ່ມີໃຜ ໆ ໝຸນໄປໄດ້ ໃຫ້ໝຸນໄປໄດ້

(ພຣະເສລະເຖຣະຄັ້ງເປັນຄະລືຫັດໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໗໔໕]	ຂ້າແດ່ພຣະໂຄດົມ ພຣະອົງຊົງປະຕິຍານວ່າ
	ເປັນພຣະສຳມາສຳພຸດທະເຈົ້າ ເປັນທຳມະຣາຊາຜູ້ປະເສີດ
	ທັງຍັງຕັດຢັ້ງຢືນວ່າ ຍັງທຳມະຈັກໃຫ້ເປັນໄປ

[໗໔໖]	ໃຜນໍເປັນເສນາບໍດີຂອງພຣະອົງຜູ້ຈະເລີນ
	ເປັນສາວົກຜູ້ປະພຶດຕາມເບື້ອງພຣະບາດທັງສອງຂອງພຣະອົງຜູ້ເປັນສາດສະດາ
	ໃຜຈະຊ່ອຍປະກາດທຳມະຈັກທີ່ພຣະອົງຊົງໃຫ້ເປັນໄປແລ້ວນີ້ໄດ້

(ພຣະຜູ້ມີພຣະພາກເຈົ້າຕັດພຣະພຸດທະພາສິດນີ້ວ່າ)

[໗໔໗]	ເສລະພາມເອີຍ ສາຣີບຸດຜູ້ເກີດຕາມຕະຖາຄົດ
	ຈະຊ່ອຍປະກາດທຳມະຈັກທີ່ຍອດຢ້ຽມເຊິ່ງເຮົາໃຫ້ເປັນໄປໄວ້ແລ້ວ

[໗໔໘]	ພາມ ເຮົາໄດ້ຮູ້ຍິ່ງທຳທີ່ຄວນຮູ້ຍິ່ງ
	ໄດ້ຈະເລີນທຳທີ່ຄວນໃຫ້ຈະເລີນ ໄດ້ລະທຳທີ່ຄວນລະໄດ້ແລ້ວ
	ຍ້ອນແນວນັ້ນ ເຮົາຈຶ່ງເປັນພຣະພຸດທະເຈົ້າ

[໗໔໙]	ພາມ ທ່ານຈົ່ງກຳຈັດຄວາມເຄືອບແຄງສົງໄສໃນເຮົາສາ
	ຈົ່ງນ້ອມໃຈເຊື່ອເຮົາສາເທີ້ນ
	ຍ້ອນວ່າການພົບເຫັນພຣະສຳມາສຳພຸດທະເຈົ້າທັງຫຼາຍ

[໗໕໐]	ຜູ້ຈະຜາກົດເນືອງ ໆ ໃນໂລກ
	ຍ່ອມເປັນການຫາໄດ້ຍາກ
	ພາມ ເຮົານັ້ນ ເປັນພຸດທະເຈົ້າ
	ເປັນໝໍປາດລູກສອນຄືກິເລດມີຣາຄະເປັນຕົ້ນຊັ້ນເລີດ

[໗໕໑]	ເປັນຜູ້ປະເສີດ ບໍ່ມີຜູ້ປຽບທຽບ
	ຍ່ຳຍີມານແລະເສນາມານ
	ເຮັດມານທັງໝົດເຊິ່ງບໍ່ແມ່ນມິດໄວ້ໃນອຳນາດ
	ບໍ່ມີໄພແຕ່ບ່ອນໃດເບີກບານຢູ່

(ພຣະເສລະເຖຣະ ຄັ້ງເປັນຄະລຶຫັດ ຂາບທູນດ້ວຍ ໓ ຄາຖາວ່າ)

[໗໕໒]	ຂ້າແດ່ພຣະອົງຜູ້ຈະເລີນ ຂໍເຊີນພຣະອົງ
	ຈົ່ງຊົງພິຈາຣະນາຄຳຂອງຂ້າພຣະອົງນີ້

ຄືຢ່າງທີ່ພຣະຕະຖາຄົດເຈົ້າຜູ້ມີພຣະຈັກຂຸ
ເປັນໜໍປາດລູກສອນຄືກິເລດມີຣາຄະເປັນຕົ້ນ
ເປັນມະຫາວີຣະ ຕັດໄວ້ດັ່ງຮາດຊະສີບັນລືໃນປ່າ

[໗໓໓] ໃຜໄດ້ເຫັນພຣະອົງຜູ້ປະເສີດ ບໍ່ມີຜູ້ປຽບທຽບ
ຍ່ຳຍີມານແລະເສນາມານ
ຈຶ່ງຈະບໍ່ເຫຼື້ອມໃສນໍ
ເຖິງຄົນທີ່ເກີດໃນຕະກູນຕ່ຳກໍຍັງເຫຼື້ອມໃສ

[໗໓໔] ຜູ້ປາຖະໜາຈະຕາມເຮົາ ກໍເຊີນມາ
ຫຼືຜູ້ບໍ່ປາຖະໜາ ກໍເຊີນກັບໄປ
ເຮົາຈະບວດໃນສຳນັກຂອງພຣະພຸດທະເຈົ້າ
ຜູ້ມີພຣະປັນຍາປະເສີດນີ້

(ມານົບທັງຫຼາຍເຊິ່ງເປັນອັນເຕວາສິກ ໓໐໐ ຄົນ ໄດ້ກ່າວພາສິດນີ້ວ່າ)

[໗໓໕] ຖ້າທ່ານອາຈານຜູ້ຈະເລີນພໍໃຈຄຳສອນ
ຂອງພຣະສຳມາສຳພຸດທະເຈົ້ານີ້
ແມ່ນພວກເຮົາກໍຈະບວດໃນສຳນັກ
ຂອງພຣະພຸດທະເຈົ້າຜູ້ມີພຣະປັນຍາປະເສີດ

(ພຣະເສລະເຖຣະ ຄັ້ງເປັນຄະລິຫັດດີໃຈ ໄດ້ຂາບທູນດ້ວຍພາສິດວ່າ)

[໗໓໖] ພາມ ໓໐໐ ຄົນນີ້ ພາກັນປະນົມມື ທູນຂໍບັນພະຊາວ່າ
ຂ້າແດ່ພຣະຜູ້ມີພຣະພາກເຈົ້າ ຂ້າພຣະອົງທັງຫຼາຍ
ຈະປະພຶດພົມມະຈັນໃນສຳນັກຂອງພຣະອົງ

(ພຣະຜູ້ມີພຣະພາກເຈົ້າ ໃຫ້ພາມທັງໝົດບວດແລ້ວ ຕັດພຣະພຸດທະພາສິດວ່າ)

[໗໓໗] ເສລະ ພົມມະຈັນເຮົາກ່າວໄວ້ດີແລ້ວ
ຜູ້ບັນລຸຈະເຫັນໄດ້ເອງ ໃຫ້ຜົນບໍ່ຈຳກັດການ
ໃນສາດສະໜາທີ່ມີການບັນພະຊາບໍ່ຂາດຜົນ
ເມື່ອຄົນທີ່ບໍ່ຜະໝາດໝັ່ນສຶກສາຢູ່

(ພຣະເສລະເຖຣະເມື່ອຈະພະຍາກອນພຣະອະຣະຫັດ ໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໗໓໗] ຂ້າແດ່ ພຣະຜູ້ມີພຣະພາກເຈົ້າຜູ້ມີພຣະຈັກຂຸ
ຍ້ອນຂ້າພຣະອົງທັງຫຼາຍໄດ້ເຖິງສະຣະນະຄົມ ນັ້ນໃນວັນທີ ໗ ແຕ່ນີ້ ດັ່ງນັ້ນ ຂ້າ
ພຣະອົງທັງຫຼາຍຈຶ່ງໄດ້ໃຊ້ເວລາເຝິກອົບຮົມ
ໃນພຣະສາດສະໜາຂອງພຣະອົງມາເປັນເວລາ ໗ ມື້

[໗໓໙] ພຣະອົງຊົງເປັນສັບພັນຍູພຸດທະເຈົ້າ
ເປັນສາດສະດາ ເປັນຈອມປາດ ຊົງຄອບງຳມານໄດ້
ຊົງຕັດອະນຸໄສກິເລດໄດ້ ຊົງຂ້າມແມ່ນ້ຳໃຫຍ່ຄືສົງສານໄດ້ແລ້ວ
ຈຶ່ງຊົງຍັງໝູ່ສັດນີ້ໃຫ້ຂ້າມໄດ້ດ້ວຍ

[໗໔໐] ພຣະອົງຊົງລ່ວງອຸປະທິກິເລດໄດ້ພົ້ນ ທຳລາຍອາສະວະແລ້ວ
ບໍ່ມີຄວາມຍຶດໝັ້ນ ລະຄວາມຢ້ານກົວໄພໄດ້
ຄືຣາດຊະສີ ບໍ່ຢ້ານຕໍ່ໝູ່ເນື້ອ

[໗໔໑] ຂ້າແດ່ພຣະອົງຜູ້ຊົງແກ່ກ້າ
ພິກຂຸທັງ ໓໐໐ ອົງນີ້ ຢືນປະນົມມືຢູ່
ຂໍພຣະອົງຊົງຢຽດພຣະບາດທັງສອງເທີ້ນ
ພິກຂຸທັງຫຼາຍ ຈະໄດ້ຖວາຍບັງຄົມພຣະອົງຜູ້ເປັນສາດສະດາ

# ໗. ພັດທິຍະກາລິໂຄທາປຸດຕະເຖຣະຄາຖາ

## ພາສິດຂອງພຣະພັດທິຍະກາລິໂຄທາປຸດເຖຣະ

(ພຣະພັດທິຍະກາລິໂຄທາບຸດເຖຣະ ໄດ້ບັນລືສີຫະນາດຕໍ່ພຣະພັກພຣະສາດສະດາ ດ້ວຍພາສິດ ເຫຼົ່ານີ້ວ່າ)

[໗໔໒] ຂ້າແດ່ພຣະອົງຜູ້ຈະເລີນ (ແຕ່ກ່ອນ) ຂ້າພຣະອົງ
ເມື່ອຈະໄປໄສ ນັ່ງຄໍຊ້າງໄປ
ເມື່ອຈະນຸ່ງຫົ່ມຜ້າ ກໍນຸ່ງຫົ່ມຜ້າເນື້ອລະອຽດ
ເມື່ອຈະບໍຣິໂພກ ກໍບໍຣິໂພກແຕ່ເຂົ້າສາລີທີ່ຣາດດ້ວຍຊີ້ນອັນສະອາດ

[໗໔໓] ບັດນີ້ ຂ້າພຣະອົງມີນາມວ່າພັດທິຍະ
ເປັນໂອຣົດຂອງພຣະນາງກາລິໂຄທາ

ເປັນຜູ້ຈະເລີນ ມີຄວາມພຽນຕໍ່ເນື່ອງ
ຍິນດີໃນອາຫານທີ່ບິນທະບາດໄດ້ມາ ບໍ່ຢຶດໝັ້ນ ເພ່ງພິນິດຢູ່

[໗໔໔] ຂ້າພຣະອົງມີນາມວ່າພັດທິຍະ ເປັນໂອຣົດຂອງພຣະນາງກາລິໂຄທາ ຖືການນຸ່ງຫົ່ມຜ້າບັງສຸກຸນເປັນຂໍ້ວັດປະຕິບັດ ມີຄວາມພຽນຕໍ່ເນື່ອງ
ຍິນດີໃນອາຫານທີ່ບິນທະບາດໄດ້ມາ ບໍ່ຢຶດໝັ້ນ ເພ່ງພິນິດຢູ່

[໗໔໕] ຯລຯ ຖືການທ່ຽວບິນທະບາດເປັນຂໍ້ວັດປະຕິບັດ
ມີຄວາມພຽນຕໍ່ເນື່ອງ ຯລຯ

[໗໔໖] ຯລຯ ຖືການຄອງຜ້າ ໓ ຜືນເປັນຂໍ້ວັດປະຕິບັດ
ມີຄວາມພຽນຕໍ່ເນື່ອງ ຯລຯ

[໗໔໗] ຯລຯ ຖືການທ່ຽວບິນທະບາດຕາມລຳດັບຮ່ອມເປັນຂໍ້ວັດປະຕິບັດ
ມີຄວາມພຽນຕໍ່ເນື່ອງ ຯລຯ

[໗໔໘] ຯລຯ ຖືການສັນຄາບດຽວເປັນຂໍ້ວັດປະຕິບັດ ມີຄວາມພຽນຕໍ່ເນື່ອງ ຯລຯ

[໗໔໙] ຯລຯ ຖືການສັນໃນບາດເປັນຂໍ້ວັດປະຕິບັດ ມີຄວາມພຽນຕໍ່ເນື່ອງ ຯລຯ

[໗໕໐] ຯລຯ ຖືການຫ້າມອາຫານທີ່ເຂົານຳມາຖວາຍພາຍຫຼັງສັນເປັນຂໍ້ວັດປະຕິບັດ
ມີຄວາມພຽນຕໍ່ເນື່ອງ ຯລຯ

[໗໕໑] ຯລຯ ຖືການຢູ່ປ່າເປັນຂໍ້ວັດປະຕິບັດ ມີຄວາມພຽນຕໍ່ເນື່ອງ ຯລຯ

[໗໕໒] ຯລຯ ຖືການຢູ່ເຫງົ້າໄມ້ເປັນຂໍ້ວັດປະຕິບັດ ມີຄວາມພຽນຕໍ່ເນື່ອງ ຯລຯ

[໗໕໓] ຯລຯ ຖືການຢູ່ກາງແຈ້ງເປັນຂໍ້ວັດປະຕິບັດ ມີຄວາມພຽນຕໍ່ເນື່ອງ ຯລຯ

[໗໕໔] ຯລຯ ຖືການຢູ່ປ່າຊ້າເປັນຂໍ້ວັດປະຕິບັດ ມີຄວາມພຽນຕໍ່ເນື່ອງ ຯລຯ

[໗໕໕] ຯລຯ ຖືການຢູ່ໃນເສນາສະນະຕາມທີ່ທ່ານຈັດໃຫ້ເປັນຂໍ້ວັດປະຕິບັດ
ມີຄວາມພຽນຕໍ່ເນື່ອງ ຯລຯ

[໗໕໖] ຯລຯ ຖືການນັ່ງເປັນຂໍ້ວັດປະຕິບັດ ມີຄວາມພຽນຕໍ່ເນື່ອງ ຯລຯ

[໗໕໗] ຯລຯ ມີຄວາມປາຖະໜາໜ້ອຍ ມີຄວາມພຽນຕໍ່ເນື່ອງ ຯລຯ

[໗໔໗] ຯລຯ ມີຄວາມສັນໂດດ ມີຄວາມພຽນຕໍ່ເນື່ອງ ຯລຯ

[໗໔໙] ຯລຯ ມັກສະຫງັດ ມີຄວາມພຽນຕໍ່ເນື່ອງ ຯລຯ

[໗໕໐] ຯລຯ ບໍ່ຄຸກຄີດ້ວຍໝູ່ຄະນະ ມີຄວາມພຽນຕໍ່ເນື່ອງ ຯລຯ

[໗໕໑] ຂ້າພຣະອົງມີນາມວ່າພັດທິຍະ ເປັນໂອຣົດຂອງພຣະນາງກາລິໂຄທາ ຜາຣົບ
ຄວາມພຽນ ມີຄວາມພຽນຕໍ່ເນື່ອງ
ຍິນດີໃນອາຫານທີ່ບິນທະບາດໄດ້ມາ
ບໍ່ມີຄວາມຢຶດໝັ້ນ ເພ່ງພິນິດຢູ່

[໗໕໒] ຂ້າພຣະອົງໄດ້ລະຖິ້ມຈານຄຳລວດລາຍວິຈິດ
ໝັກຮ້ອຍປະລະມາໃຊ້ແທນບາດດິນ
ນີ້ເປັນການອະພິເສກຄັ້ງທີສອງ

[໗໕໓] ແຕ່ກ່ອນ ຂ້າພຣະອົງມີໝູ່ທະຫານ
ຖືດາບຖ້າຄຸ້ມຄອງຮັກສາຢູ່ໃນພຣະນະຄອນ
ເຊິ່ງມີປ້ອມແລະຊຸ້ມປະຕູທີ່ແຂງແຮງ
ເຊິ່ງທ້ອມລ້ອມດ້ວຍກຳແພງເປັນວົງມົນ ສູງລິ່ວ ຢູ່ຢ່າງຫວາດຣະແວງ

[໗໕໔] ບັດນີ້ ຂ້າພຣະອົງມີນາມວ່າພັດທິຍະ ເປັນໂອຣົດຂອງພຣະນາງກາລິໂຄທາ
ເປັນຜູ້ຈະເລີນ ບໍ່ຫວາດຣະແວງ ລະຄວາມຢ້ານກົວໄພໄດ້
ມາສູ່ປ່າ ເພ່ງພິນິດຢູ່

[໗໕໕] ດຳລົງໝັ້ນຢູ່ໃນກອງສີນ ຈະເລີນສະຕິແລະປັນຍາຢູ່
ໄດ້ບັນລຸຄວາມສິ້ນສັງໂຍດທັງໝົດແລ້ວ ໂດຍລຳດັບ

## ໗. ອັງຄຸລິມາລະເຖຣະຄາຖາ

### ພາສິດຂອງພຣະອົງຄຸລິມານເຖຣະ

(ພຣະອົງຄຸລິມານເຖຣະ ຄັ້ງຍັງເປັນຄະລີຫັດ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດ້ວຍພາສິດວ່າ)

[໗໕໖] ທ່ານສະມະນະ ທ່ານຍັງຍ່າງຢູ່ ແຕ່ກັບກ່າວວ່າ ເຮົາຢຸດແລ້ວ
ແລະກ່າວຫາເຮົາເຊິ່ງຢຸດແລ້ວວ່າ ບໍ່ຢຸດ

ທ່ານສະມະນະ ເຮົາຂໍຖາມທ່ານເຖິງຄວາມຂໍ້ນີ້ທີ່ວ່າ
ທ່ານຢຸດແລ້ວ ແຕ່ເຮົານັ້ນ ບໍ່ຢຸດ ແນວໃດກັນ

(ພຣະຜູ້ມີພຣະພາກເຈົ້າໄດ້ຕັດຕອບອົງຄຸລິມານໂຈນນັ້ນດ້ວຍພຣະຄາຖາວ່າ)

[໗໖໗] ອົງຄຸລິມານ ເຮົາໄດ້ລະຖິ້ມການລົງໂທດໃນສັດທັງມວນຢູ່ທຸກເມື່ອ ສ່ວນທ່ານນັ້ນບໍ່ສັງລວມໃນສັດທັງຫຼາຍ
ຍ້ອນແນວນັ້ນ ເຮົາຈຶ່ງຊື່ວ່າຢຸດແລ້ວ
ສ່ວນທ່ານຊື່ວ່າຍັງບໍ່ຢຸດ

(ອົງຄຸລິມານໂຈນ ຂາບທູນວ່າ)

[໗໖໘] ເປັນເວລາດົນນໍທີ່ພຣະອົງເຊິ່ງເປັນສະມະນະ
ທີ່ຊາວໂລກພ້ອມທັງເທວະໂລກບູຊາ ຊົງສະແຫວງຫາຄຸນອັນຍິ່ງໃຫຍ່
ໄດ້ສະເດັດພຣະຣາດຊະດຳເນີນມາສູ່ປ່າໃຫຍ່ເພື່ອອະນຸເຄາະຂ້າພຣະອົງ
ຂ້າພຣະອົງນັ້ນ ໄດ້ສະດັບພຣະພຸດທະພາສິດ
ເຊິ່ງປະກອບດ້ວຍທຳຂອງພຣະອົງຈະເຊົາລະບາບເປັນພັນ

(ພຣະສັງຄີຕິກາຈານ ໄດ້ຣົດຈະນາ ໔ ພາສິດເຫຼົ່ານີ້ວ່າ)

[໗໖໙] ເມື່ອອົງຄຸລິມານໂຈນຂາບທູນແລ້ວ
ກໍໄດ້ໂຍນດາບແລະອາວຸດຖິ້ມລົງເຫວເຊິ່ງທັງກວ້າງແລະເລິກ
ໄດ້ຖວາຍບັງຄົມພຣະບາດທັງສອງພຣະສຸຄົດເຈົ້າ
ໄດ້ທູນຂໍບວດກັບພຣະພຸດທະເຈົ້າຢູ່ບ່ອນນັ້ນນັ້ນເອງ

[໗໗໐] ທັນໃດນັ້ນເອງ ພຣະພຸດທະເຈົ້າ ຊົງມີພຣະກະລຸນາ
ຊົງສະແຫວງຫາຄຸນອັນຍິ່ງໃຫຍ່ ເປັນສາດສະດາຂອງຊາວໂລກ
ພ້ອມທັງເທວະໂລກ ໄດ້ຕັດກັບອົງຄຸລິມານໂຈນນັ້ນວ່າ
ຈົ່ງເປັນພິກຂຸມາເທີ້ນ ພຽງທໍ່ນີ້
ອົງຄຸລິມານໂຈນນັ້ນ ກໍໄດ້ເປັນພິກຂຸ

(ພຣະອົງຄຸລິມານເຖຣະເກີດປີຕິໂສມະນັດ ຈຶ່ງໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໗໗໑] ຜູ້ໃດ ຜະໝາດແລ້ວໃນການກ່ອນ
ພາຍຫຼັງ ບໍ່ຜະໝາດ

ຜູ້ນັ້ນຍ່ອມເຮັດໂລກນີ້ໃຫ້ສະຫວ່າງສະໄຫວ
ຄືດວງຈັນພົ້ນຈາກກ້ອນເຜື້ອ

[໒໗໔] ບາບກຳທີ່ເຮັດໄວ້ ຜູ້ໃດອັດກັ້ນໄດ້ ດ້ວຍກຸສົນ
ຜູ້ນັ້ນ ຍ່ອມເຮັດໂລກນີ້ໃຫ້ສະຫວ່າງສະໄຫວ
ຄືດວງຈັນພົ້ນຈາກກ້ອນເຜື້ອ

[໒໗໖] ພິກຂຸໃດແລຍັງໜຸ່ມແໜ້ນ
ຍ່ອມປະກອບຂົນຂວາຍໃນພຣະພຸດທະສາດສະໜາ
ພິກຂຸນັ້ນ ຍ່ອມເຮັດໂລກນີ້ໃຫ້ສະຫວ່າງສະໄຫວ
ຄືດວງຈັນພົ້ນຈາກກ້ອນເຜື້ອ

[໒໗໘] ພວກຄົນທີ່ເປັນຂ້າເສິກກັບເຮົາ
ຂໍເຊີນສະດັບທຳມະກະຖາ
ຂໍເຊີນປະຕິບັດໃນພຣະພຸດທະສາດສະໜາ
ຂໍເຊີນຄົບຄ້າສະມາຄົມກັບຄົນທີ່ເປັນສັດຕະບຸຣຸດ
ເຊິ່ງຍຶດໝັ້ນແຕ່ທຳທີ່ນັ້ນ

[໒໗໕] ຂໍເຊີນສະດັບທຳຂອງທ່ານທີ່ກ່າວສັນເສີນຄວາມອົດທົນ
ມັກສັນເສີນຄວາມບໍ່ໂກດໄດ້ຕາມການ
ແລະຂໍເຊີນປະຕິບັດຕາມທຳທີ່ໄດ້ສະດັບແລ້ວນັ້ນ

[໒໗໖] ຜູ້ເປັນຂ້າເສິກກັບເຮົານັ້ນແລ
ຢ່າເພິ່ງບຽດບຽນເຮົາ ຫຼືສັດໃດ ໆ ອື່ນເລີຍ
ເພິ່ງເຖິງຄວາມສະງົບອັນຢັ່ງມ
ແລະເພິ່ງຮັກສາຄຸ້ມຄອງສັດທັງມວນຄືອາຈານຄຸ້ມຄອງສິດ

[໒໗໗] ພວກຄົນໄຂນ້ຳກໍເຮັດໜ້າທີ່ໄຂນ້ຳ
ພວກຊ່າງທຳສອນກໍດັດລູກສອນ
ພວກຊ່າງໄມ້ກໍຖາກໄມ້
ພວກບັນດິດກໍເຝິກຕົນ

[໒໗໒] ຄົນເຝິກຊ້າງແລະຄົນເຝິກມ້າລາງພວກ
ມີໄມ້ຄ້ອນ ຂໍແລະແສ້ຈຶ່ງຈະເຝິກໄດ້

ເຮົາພຣະສຳມາສຳພຸດທະເຈົ້າຜູ້ໝັ້ນຄົງ
ເຊິ່ງບໍ່ຕ້ອງໃຊ້ອາດຍາ ບໍ່ຕ້ອງໃຊ້ອາວຸດ ຊົງເຝິກໄດ້ເລີຍ

[໘໗໙] ແຕ່ກ່ອນເຮົາມີຊື່ວ່າ ອະຫິງສະກະ ແຕ່ຍັງບຽດບຽນຢູ່
ມື້ນີ້ ເຮົາມີຊື່ທີ່ເປັນຈິງ ບໍ່ບຽດບຽນໃຜ ໆ ເລີຍ

[໘໘໐] ແຕ່ກ່ອນ ເຮົາໄດ້ເປັນໂຈນລືຊື່ທົ່ວໄປວ່າ ອົງຄຸລິມານ
ຖືກແມ່ນ້ຳໃຫຍ່ພັດພາໄປ
ຈົນໄດ້ມາເຖິງພຣະພຸດທະເຈົ້າວ່າເປັນບ່ອນເພິ່ງ

[໘໘໑] ຄັ້ງກ່ອນ ເຮົາມີມືເປື້ອນເລືອດລືຊື່ທົ່ວໄປວ່າ ອົງຄຸລິມານ
ເບິ່ງເອົາເທີ້ນ ສະຣະນະຄົມ[໑]
ເຮົາຖອນຕັນຫາທີ່ນຳໄປສູ່ພົບໄດ້ແລ້ວ

[໘໘໒] ເຮົາໄດ້ເຮັດກຳອັນເປັນເຫດໃຫ້ໄປທຸກຄະຕິເຊັ່ນນັ້ນໄວ້ຫຼາຍ
ຈຶ່ງຕ້ອງຮັບຜົນກຳ
ບັດນີ້ຍ່ອມສັນໂພຊະນະທີ່ບໍ່ເປັນໜີ້

[໘໘໓] ເຫຼົ່າຊົນພານທີ່ມີປັນຍາຊາມ
ຍ່ອມປະກອບຄວາມຜະໝາດຢູ່ເນືອງ ໆ
ສ່ວນຜູ້ທີ່ມີປັນຍາຍ່ອມຮັກສາຄວາມບໍ່ຜະໝາດໄວ້
ຄືບຸກຄົນຮັກສາຊັບອັນປະເສີດທີ່ສຸດໄວ້

[໘໘໔] ບຸກຄົນ ຢ່າເພິ່ງຂົນຂວາຍຄວາມຜະໝາດ
ຢ່າຂົນຂວາຍຫາຄວາມສະນິດສະໜົມດ້ວຍຄວາມຍິນດີໃນກາມ
ຍ້ອນຜູ້ທີ່ບໍ່ຜະໝາດເພ່ງພິນິດຢູ່
ຍ່ອມປະສົບຄວາມສຸກຢ່າງຍິ່ງ

[໘໘໕] ການທີ່ເຮົາມາສຳນັກພຣະສາດສະດາເປັນການດີແລ້ວ ບໍ່ແມ່ນບໍ່ດີ
ການທີ່ເຮົາຄິດຈະບວດໃນສຳນັກພຣະສາດສະດານີ້ກໍບໍ່ແມ່ນເປັນການຄິດບໍ່ດີ
ນັ້ນເປັນການເຂົ້າເຖິງທຳອັນປະເສີດ
ໃນພຣະທຳທີ່ພຣະສາດສະດາຊົງຈຳແນກໄວ້ດີແລ້ວ

[໘໘໖] ການທີ່ເຮົາມາຍັງສຳນັກພຣະຜູ້ມີພຣະພາກເຈົ້າ
ເປັນການມາດີແລ້ວບໍ່ຂາດປະໂຫຍດ

ການທີ່ເຮົາຄິດຈະບວດໃນສຳນັກຂອງພຣະຜູ້ມີພຣະພາກເຈົ້ານີ້
ເປັນຄວາມຄິດບໍ່ຊົ່ວເລີຍ
ເຮົາໄດ້ບັນລຸວິດຊາ ໓ ໄດ້ເຮັດຕາມຄຳສັ່ງສອນຂອງພຣະພຸດທະເຈົ້າແລ້ວ

[໗໗໗] ແຕ່ກ່ອນ ເຮົາຢູ່ຕາມປ່າ ຕາມເຫງົ້າໄມ້ ຕາມພູ ຕາມຖ້ຳ
ທຸກຫົນແຫ່ງ ຢ່າງມີໃຈຫວາດຣະແວງ

[໗໗໘] ພໍພຣະສາດສະດາຊົງອະນຸເຄາະແລ້ວ
ບໍ່ຕ້ອງຕົກຢູ່ໃນບ້ວງມີມານ ຈະຢືນ ຍ່າງ ນັ່ງ ນອນ ກໍເປັນສຸກ

[໗໗໙] ແຕ່ກ່ອນ ເຮົາມີເຊື້ອຊາດເປັນພາມ
ມີທ້ອງເປັນທີ່ຖືປະຕິສົນທິບໍລິສຸດທັງ ໔ ຝ່າຍ
ມື້ນີ້ ເຮົານັ້ນເປັນໂອຣົດຂອງພຣະສຸຄົດສາດສະດາຜູ້ເປັນພຣະທຳມະຣາຊາ

[໗໙໐] ປາສະຈາກຕັນຫາ ບໍ່ຢຶດໝັ້ນ ຄຸ້ມຄອງທະວານ ສັງລວມດີແລ້ວ
ຕັດຮາກເຫງົ້າແຫ່ງທຸກໄດ້ແລ້ວ ຄວາມສິ້ນອາສະວະເຮົາບັນລຸແລ້ວ

[໗໙໑] ເຮົາປົນນິບັດພຣະສາດສະດາ
ໄດ້ເຮັດຕາມຄຳສັ່ງສອນຂອງພຣະພຸດທະເຈົ້າແລ້ວ
ປົງພາຣະທີ່ໜັກໄດ້ ຖອນຕັນຫາທີ່ນຳໄປສູ່ພົບໄດ້ຂາດແລ້ວ

## ໙. ອະນຸຣຸດທະເຖຣະຄາຖາ

### ພາສິດຂອງພຣະອະນຸຣຸດທະເຖຣະ

(ພຣະອະນຸຣຸດທະເຖຣະ ສະເຫວີຍວິມຸດຕິສຸກຢູ່ ພິຈາລະນາຂໍ້ປະຕິບັດຂອງຕົນ ເກີດປີຕິໂສມະນັດ ຈຶ່ງໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໗໙໔] ອະນຸຣຸດທະນີ້ແລ ລະພຣະຊະນົກຊົນນີ
ພຣະປະຍູນຍາດແລະກາມມະຄຸນ ໕ ໄດ້ແລ້ວ ເຂົ້າຊານຢູ່

[໗໙໓] ບຸກຄົນຜູ້ພຽບພ້ອມດ້ວຍການຟ້ອນລຳຂັບຮ້ອງ
ມີສຽງດົນຕີທີ່ບັນເລງປຸກໃຫ້ບັນເທີງໃຈຢູ່ທຸກຄ່ຳເຊົ້າ
ຍ່ອມບໍ່ບັນລຸເຖິງຄວາມບໍລິສຸດດ້ວຍການບໍຣິໂພກກາມນັ້ນ
ຍັງຍິນດີໃນກາມມະຄຸນເຊິ່ງເປັນວິໄສຂອງມານ

[໗໙໔] ສ່ວນອະນຸຣຸດທະນີ້ແລ້ວ ລ່ວງກາມມະຄຸນ ໕ ນີ້ໄດ້ແລ້ວ
ຍິນດີໃນຄຳສອນຂອງພຣະພຸດທະເຈົ້າ
ລ່ວງໂອຄະທັງປວງໄດ້ແລ້ວ ເຂົ້າຊານຢູ່

[໗໙໕] ແລະລ່ວງກາມມະຄຸນ ໕ ເຫຼົ່ານີ້ ຄື
ຮູບ ສຽງ ກິ່ນ ຣົດ ແລະໂຜດຖັບພະ
ທີ່ໜ້າອອນຊອນໃຈ ເຂົ້າຊານຢູ່

[໗໙໖] ອະນຸຣຸດທະ ເປັນປາດ ບໍ່ມີອາສະວະ
ກັບຈາກບິນທະບາດແລ້ວ
ທ່ຽວສະແຫວງຫາຜ້າບັງສຸກຸນແຕ່ຜູ້ດຽວບໍ່ມີເພື່ອນ

[໗໙໗] ອະນຸຣຸດທະ ຜູ້ເປັນປາດ ມີປັນຍາ ບໍ່ມີອາສະວະ
ທ່ຽວເລືອກຫາແຕ່ຜ້າບັງສຸກຸນ
ເມື່ອໄດ້ແລ້ວ ຊັກ ຍ້ອມເອງ ແລ້ວນຸ່ງຫົ່ມ

[໗໙໘] ບາບທຳທີ່ເສົ້າໝອງເຫຼົ່ານີ້ ຍ່ອມມີແກ່ພິກຂຸຜູ້ມັກຫຼາຍ
ບໍ່ສັນໂດດ ມັກຄຸກຄີດ້ວຍໝູ່ຄະນະ ແລະມີຈິດຟຸ້ງຊ່ານ

[໗໙໙] ສ່ວນພິກຂຸຜູ້ມີສະຕິ ມັກໜ້ອຍ ສັນໂດດ
ບໍ່ມີຄວາມຂັດເຄືອງ ຍິນດີໃນວິເວກ
ມັກສະຫງັດ ຜາຣົບຄວາມພຽນເປັນປະຈຳ

[໙໐໐] ຍ່ອມມີແຕ່ກຸສົນທຳ ເຊິ່ງເປັນຝ່າຍໃຫ້ຕັດສະຣູ້ເຫຼົ່ານີ້
ທັງພຣະສຳມາສຳພຸດທະເຈົ້າຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ກໍຕັດວ່າ
ພິກຂຸນັ້ນເປັນຜູ້ບໍ່ມີອາສະວະ

[໙໐໑] ພຣະສາດສະດາຜູ້ປະເສີດໃນໂລກ
ຊົງຮູ້ຄວາມດຳຣິຂອງເຮົາແລ້ວ
ສະເດັດມາຫາເຮົາດ້ວຍພຣະວໍຣະກາຍທີ່ສຳເລັດໂດຍມະໂນມະຍິດທິ

[໙໐໔] ເມື່ອໃດ ເຮົາມີຄວາມດຳຣິ
ເມື່ອນັ້ນ ພຣະພຸດທະເຈົ້າຊົງຮູ້ແລ້ວກໍສະເດັດມາຫາເຮົາດ້ວຍລິດ
ໄດ້ຊົງສະແດງທຳອັນຍິ່ງແກ່ເຮົາ

ພຣະພຸດທະເຈົ້າຜູ້ຊົງຍິນດີໃນທຳທີ່ບໍ່ລ້າຊ້າ
ໄດ້ຊົງສະແດງທຳທີ່ບໍ່ລ້າຊ້າແກ່ເຮົາໄວ້ແລ້ວ

[໗໐໓] ເຮົາໄດ້ຮູ້ທົ່ວເຖິງທຳຂອງພຣະອົງ
ຍິນດີຢູ່ໃນຄຳສອນຂອງພຣະອົງ
ບັນລຸວິດຊາ ໓ ໄດ້ເຮັດຕາມຄຳສັ່ງສອນຂອງພຣະພຸດທະເຈົ້າແລ້ວ

[໗໐໔] ຕັ້ງແຕ່ເວລາທີ່ເຮົາຖືການບໍ່ນອນເປັນຂໍ້ວັດປະຕິບັດຕະຫຼອດ ໕໕ ປີ
ກຳຈັດຄວາມງ້ວງເຫງົາຫາວນອນໄດ້ ມາເປັນເວລາ ໒໕ ປີ
ພຣະອະນຸຣຸດທະເຖຣະ(ເມື່ອພິກຂຸທັງຫຼາຍ
ຖາມໃນເວລາທີ່ພຣະສາດສະດາສະ
ເດັດດັບຂັນທະປະຣິນິບພານວ່າ
ພຣະຜູ້ມີພຣະພາກເຈົ້າປະຣິນິບພານແລ້ວຫຼືຍັງ
ໄດ້ປະກາດວ່າ ພຣະຜູ້ມີພຣະພາກເຈົ້າ
ປະຣິນິບພານແລ້ວ ດ້ວຍພາສິດເຫຼົ່ານີ້ວ່າ)

[໗໐໕] ພຣະຜູ້ມີພຣະພາກເຈົ້າຜູ້ມີພຣະທະໄທຕັ້ງໝັ້ນ ຄົງທີ່
ບໍ່ໄດ້ມີລົມຫັນໃຈເຂົ້າຫັນໃຈອອກ
ພຣະອົງບໍ່ຊົງຫວັ່ນໄຫວ ຜາຣົບຄວາມສະງົບ
ມີພຣະຈັກຂຸ ສະເດັດປະຣິນິບພານແລ້ວ

[໗໐໖] ຊົງມີພຣະທະໄທບໍ່ທົດທູ່ ອົດກັ້ນເວທະນາໄດ້
ມີພຣະທະໄທລຸດພົ້ນໄປ
ຄືດວງປະທີບທີ່ລຸກເປັນແປວແລ້ວກໍດັບໄປ

[໗໐໗] ບັດນີ້ ທຳເຫຼົ່ານີ້ເຊິ່ງມີສຳຜັດເປັນທີ ໕
ຂອງພຣະມະຫາມຸນີໄດ້ສິ້ນສຸດລົງ
ເມື່ອພຣະສຳມາສຳພຸດທະເຈົ້າສະເດັດປະຣິນິບພານແລ້ວ
ຈິດແລະເຈຕະສິກທຳເຫຼົ່າອື່ນຈັກບໍ່ມີອີກຕໍ່ໄປ

[໗໐໘] ເທວະດາ ບັດນີ້ ເຮົາບໍ່ມີການຢູ່ຄືການອຸບັດໃນໝູ່ເທບອີກຕໍ່ໄປ ການວຽນ
ວ່າຍຕາຍເກີດສິ້ນໄປແລ້ວ ບັດນີ້ບໍ່ມີການເກີດອີກ

[໙໐໙] ພິກຂຸໃດຮູ້ແຈ້ງມະນຸດສາໂລກເທວະໂລກ ພ້ອມທັງພົມມະໂລກ
ເຊິ່ງມີປະເພດເປັນພັນໄດ້ໃນການບຶດດຽວ
ທັງເປັນຜູ້ຊ່ຽວຊານໃນຄຸນຄືລຶດ
ໃນຈຸຕິແລະອຸບັດຂອງສັດທັງຫຼາຍ
ພິກຂຸນັ້ນ ຍ່ອມເຫັນເທບພະເຈົ້າທັງຫຼາຍໄດ້ໃນຂະນະທີ່ເກີດ

[໙໑໐] ຊາດກ່ອນ ເຮົາມີຊື່ອັນນະພາຣະ
ເປັນຄົນທຸກຍາກ ທ່ຽວຮັບຈ້າງລ້ຽງຊີບ
ໄດ້ຖວາຍອາຫານບິນທະບາດແດ່ພຣະອຸປະຣິດຖະປັດເຈກພຸດທະເຈົ້າ
ຜູ້ສະງົບ ຜູ້ມີຍົດ

[໙໑໑] ເຮົານັ້ນເກີດໃນສາກະຍະສະກຸນ
ພຣະປະຍູນຍາດຊົງຂະໜານນາມໃຫ້ເຮົາວ່າ ອະນຸຣຸດທະ
ເປັນຜູ້ພຽບພ້ອມດ້ວຍການຟ້ອນລຳ ຂັບຮ້ອງ
ມີສຽງດົນຕີທີ່ບັນເລງປຸກໃຫ້ບັນເທີງໃຈຢູ່ທຸກຄ່ຳເຊົ້າ

[໙໑໒] ເມື່ອຕໍ່ມາ ເຮົາໄດ້ພົບພຣະສຳມາສຳພຸດທະເຈົ້າ
ຜູ້ຫາໄພແຕ່ບ່ອນໃດບໍ່ໄດ້
ເຮັດຈິດໃຫ້ເຫຼື້ອມໃສໃນພຣະອົງແລ້ວບວດເປັນບັນພະຊິດ

[໙໑໓] ເຮົາຮູ້ຈັກຂັນທີ່ເຄີຍຢູ່ອາໄສມາກ່ອນ
ເກີດເປັນທ້າວສັກກະໃນໝູ່ເທບຊັ້ນຕາວະຕິງສາ

[໙໑໔] ປາບໄພຣີໃຫ້ປຣາໄຊ
ໄດ້ຄອງຣາດເປັນພຣະເຈົ້າຈັກກະພັດ
ຈອມມະນຸດໃນຊົມພູທະວີບ ເຊິ່ງມີສະມຸດສາຄອນທັງ ໔
ເປັນຂອບເຂດ ໗ ຄັ້ງ
ໄດ້ປົກຄອງປວງປະຊາກອນໂດຍທຳ
ບໍ່ຕ້ອງໃຊ້ອາດຍາ
ບໍ່ຕ້ອງໃຊ້ອາວຸດ

[໙໑໕] ໄດ້ຣະນຶກຊາດກ່ອນໃນເວລາທີ່ຢູ່ໃນເທວະໂລກໄດ້ ໑໔ ຊາດ
ຄື ຄັ້ງທີ່ເປັນພຣະເຈົ້າຈັກກະພັດ ໗ ຊາດ
ຄັ້ງທີ່ເປັນທ້າວສັກກະ ໗ ຊາດ

[໗໑໖]　ເມື່ອສະມາທິປະກອບດ້ວຍອົງ ໕ ມີອາລົມເປັນໜຶ່ງ
ໄດ້ຄວາມສະງົບລະງັບແລ້ວ
ທິບພະຈັກຂຸຂອງເຮົາຈຶ່ງມີດຈິດ

[໗໑໗]　ເຮົາດຳລົງໝັ້ນຢູ່ໃນຊານທີ່ປະກອບດ້ວຍອົງ ໕
ຈຶ່ງຮູ້ຈຸຕິແລະອຸບັດ
ການມາ ການໄປຂອງສັດທັງຫຼາຍວ່າ
ເປັນແນວນີ້ ບໍ່ເປັນແນວອື່ນ

[໗໑໘]　ເຮົາປົນນິບັດພຣະສາດສະດາ ຯລຯ
ຖອນຕັນຫາທີ່ນຳໄປສູ່ພົບໄດ້ຂາດແລ້ວ

[໗໑໙]　ຈະປະຣິນິບພານທີ່ບໍ່ມີອາສະວະ ຍ້ອນສິ້ນຊີວິດ
ພາຍໃຕ້ພຸ່ມໄມ້ໄຜ່ໃກ້ເວລຸວະຄາມ ແຄວັນວັດຊີ

## ໑໐. ປາຣາປະຣິຍະເຖຣະຄາຖາ

### ພາສິດຂອງພຣະປາຣາປະຣິຍະເຖຣະ

(ພຣະສັງຄີຕິກາຈານທັງຫຼາຍຣິດຈະນາຄາຖານີ້ວ່າ)

[໗໒໐]　ພຣະປາຣາປະຣິຍະເຖຣະຜູ້ເປັນສະມະນະ
ມີຈິດແນ່ວແນ່ເປັນອາລົມດຽວ
ມັກສະຫງັດ ນັ່ງຈະເລີນຊານຢູ່ໃນປ່າໃຫຍ່
ໃນລະດູດອກໄມ້ບົ່ງ ໄດ້ມີຄວາມຄິດວ່າ

[໗໒໑]　ເມື່ອພຣະໂລກນາດເຊິ່ງເປັນບຸຣຸດຜູ້ສູງສຸດ ຍັງຊົງພະຊົນຊີບຢູ່
ຄວາມປະພຶດຂອງພິກຂຸທັງຫຼາຍໄດ້ເປັນແນວໜຶ່ງ
ບັດນີ້ ເມື່ອພຣະອົງສະເດັດປະຣິນິບພານແລ້ວ
ຍ່ອມຜາກົດເປັນອີກແນວໜຶ່ງ

[໗໒໒]　ພິກຂຸທັງຫຼາຍແຕ່ປາງກ່ອນ ສັນໂດດດ້ວຍປັດໄຈຕາມມີຕາມໄດ້
ໄດ້ນຸ່ງຫົ່ມຜ້າເປັນປະຣິມົນທົນພຽງເພື່ອຈະປ້ອງກັນຄວາມໜາວຄວາມຮ້ອນແລະ
ລົມ ປົກປິດອະໄວຍະວະທີ່ຈະໃຫ້ເກີດຄວາມລະອາຍທໍ່ນັ້ນ

[໙໘໓] ໄດ້ຂົບສັນອາຫານປະນີດກໍຕາມ ເສົ້າໝອງກໍຕາມ
ໜ້ອຍກໍຕາມ ຫຼາຍກໍຕາມ
ພຽງເພື່ອຍັງອັດຕະພາບໃຫ້ເປັນໄປໄດ້ ບໍ່ຕິດ ບໍ່ພົວພັນ

[໙໘໔] ບໍ່ໄດ້ຂົນຂວາຍຈົນເກີນໄປໃນຢາແກ້ໄຂ້
ເຊິ່ງເປັນບໍຣິຂານເຄື່ອງຮັກສາຊີວິດ ຄືຂົນຂວາຍໃນຄວາມສິ້ນອາສະວະ

[໙໘໕] ພອກພູນວິເວກ ມຸ້ງແຕ່ວິເວກ
ຢູ່ໃນປ່າ ເຫງົ້າຕົ້ນໄມ້ ຮ່ອມພູ ແລະຖໍ້າ

[໙໘໖] ອ່ອນນ້ອມ ມີສັດທາຕັ້ງໝັ້ນ ລ້ຽງງ່າຍ ອ່ອນໂຍນ
ມີໃຈບໍ່ກະດ້າງ ບໍ່ປາສະຈາກສະຕິ ບໍ່ປາກຮ້າຍ
ໄຝ່ຄິດແຕ່ປະໂຫຍດຕົນແລະປະໂຫຍດຜູ້ອື່ນເປັນສໍາຄັນ

[໙໘໗] ຍ້ອນເຫດນັ້ນ ພິກຂຸແຕ່ປາງກ່ອນເຫຼົ່ານັ້ນ
ມີຄວາມປະພຶດທາງກາຍແລະທາງວາຈາ
ການບໍຣິໂພກປັດໄຈການສ້ອງເສບໂຄຈອນ
ແລະມີອິລິຍາບົດລະມຸນລະໄມ ໜ້າເຫຼື້ອມໃສ
ຄືສາຍນໍ້າມັນທີ່ໄຫຼອອກຈາກພາຊະນະບໍ່ຂາດສາຍ

[໙໘໘] ບັດນີ້ ທ່ານເຫຼົ່ານັ້ນ ສິ້ນອາສະວະໝົດແລ້ວ
ມັກຈະເລີນຊານຫຼວງຫຼາຍ
ປະກອບດ້ວຍປະໂຫຍດຫຼາຍ
ເປັນພຣະເຖຣະ ນິບພານແລ້ວ
ດ່ຽວນີ້ທ່ານເຊັ່ນນັ້ນຍັງເຫຼືອຢູ່ຈໍານວນໜ້ອຍ

[໙໘໙] ຍ້ອນກຸສົນທໍາແລະປັນຍາສິ້ນໄປ
ຄໍາສອນຂອງພຣະຊິນນະເຈົ້າເຊິ່ງປະກອບດ້ວຍສະພາວະອັນປະເສີດ
ທຸກຢ່າງກໍເລືອນຫາຍໄປ

[໙໙໐] ເວລາທີ່ບາບທໍາແລະກິເລດກໍາລັງເຟື່ອງຟູ
ສ່ວນເຫຼົ່າພິກຂຸທີ່ມຸ້ງໝັ້ນເພື່ອຄວາມສະງົບສະຫງັດ
ຊື່ວ່າເປັນຜູ້ມີພຣະສັດທໍາທີ່ເຫຼືອເປັນຂໍ້ປະຕິບັດ

[໙໓໑]	ກິເລດເຫຼົ່ານັ້ນເພື່ອງຟູຢູ່
ກໍຍ່ອມຄອບງຳຊົນຜູ້ໂງ່ຈ້າເປັນຈຳນວນຫຼາຍ
ຄືຈະເຍາະເຍີ້ຍຫຼິ້ນກັບເຫຼົ່າຊົນຜູ້ໂງ່ຈ້າ
ຄືຜີສາດເຂົ້າສິງຜູ້ຄົນເຮັດໃຫ້ບ້າ
ແລ້ວຫຼິ້ນກັບພວກເຂົາທີ່ບ້າແລ້ວ

[໙໓໒]	ຄົນທີ່ຍັງໂງ່ຈ້າເຫຼົ່ານັ້ນ ຖືກກິເລດຄອບງຳ
ຈຶ່ງພ່ານໄປໃນວັດຖຸເປັນບ່ອນຕັ້ງແຫ່ງກິເລດ
ຕາມສ່ວນແຫ່ງອາລົມນັ້ນ ໆ
ຄືພ່ານໄປຫາສິ່ງທີ່ຕົນຕ້ອງການ ທີ່ເຂົາເຊີນຊວນໄວ້ ສັນນັ້ນ

[໙໓໓]	ລະພຣະສັດທຳແລ້ວ ຜິດຖຽງກັນເອງ
ຍຶດຖືເອົາຄວາມເຫັນຂອງຕົນ ສຳຄັນວ່າ ນີ້ທີ່ນັ້ນ ປະເສີດ

[໙໓໔]	ນໍຣະຊົນທັງຫຼາຍ ລະຖິ້ມຊັບສົມບັດ
ແລະບຸດພັນລະຍາອອກບວດແລ້ວ
ຍ່ອມພາກັນເຮັດກຳທີ່ບັນພະຊິດບໍ່ຄວນເຮັດ
ແມ່ນຍ້ອນເຫດແຫ່ງພິກສາຈອງດຽວ

[໙໓໕]	ພວກທ່ານສັນພັດຕາຫານເຕັມອີ່ມແລ້ວ
ເມື່ອນອນກໍນອນຫງາຍ
ຕື່ນແລ້ວ ກ່າວແຕ່ຄຳເວົ້າທີ່ພຣະສາດສະດາຊົງຕຳໜິຕິຕຽນ

[໙໓໖]	ພາຍໃນບໍ່ສະງົບ ສົນໃຈສຶກສາແຕ່ສິລະປະ
ທີ່ຊາວບ້ານທົ່ວໄປສຶກສາກັນ
ປະໂຫຍດແຫ່ງຄວາມເປັນສະມະນະ
ຍ່ອມລ່ວງເລີຍພວກທ່ານໄປສາ

[໙໓໗]	ພິກຂຸທັງຫຼາຍທີ່ມຸ້ງຫວັງຈະໄດ້ຫຼາຍ ໆ
ຈຶ່ງນ້ອມສິ່ງຂອງເຂົ້າໄປໃຫ້ພວກຄະລືຫັດ ຄື
ດິນໜຽວແດ່ ນ້ຳມັນແດ່ ຈຸນເຈີມແດ່
ນ້ຳແດ່ ບ່ອນນັ່ງບ່ອນນອນແດ່ ອາຫານແດ່

[໙໓໗] ໄມ້ສີແຂ້ວແດ່ ໝາກຂວິດແດ່
ດອກໄມ້ແດ່ ຂອງຄວນຫຍ້ຳແດ່ ບິນທະບາດທີ່ສົມບູນດ້ວຍກັບແດ່
ໝາກມ່ວງແດ່ ໝາກຂາມປ້ອມແດ່

[໙໓໙] ຍ່ອມປະຕິບັດຕົນໃນການປະກອບຢາ
ເພື່ອພວກຄະລືຫັດຄືໝໍ
ເຮັດກິດນ້ອຍໃຫຍ່ຄືຄະລືຫັດ
ຕົກແຕ່ງຮ່າງກາຍຄືແມ່ຍິງແພດສະຫຍາ
ວາງໂຕເປັນໃຫຍ່ຄືກະສັດ

[໙໔໐] ໃຊ້ອຸບາຍຫຼາຍແນວ ຄື ເຮັດໃຫ້ຄົນຫຼົງເຊື່ອ
ຫຼອກລວງ ເປັນພະຍານບໍ່ຈິງ
ໃຊ້ເລ້ຫຼ່ຽມຕ່າງ ໆ ບໍຣິໂພກອາມິດ

[໙໔໑] ມຸ້ງແຕ່ຈະເປັນຢູ່ ຈຶ່ງແລ່ນໄປຕາມ(ບາບທຳ)
ໃນການເວົ້າລຽບຄຽງ ອ້ອມຄ້ອມໃຊ້ໂວຫານເລັກໜ້ອຍ
ໃຊ້ອຸບາຍ ຮິບໂຮມຊັບໃຫ້ໄດ້ຫຼາຍ ໆ

[໙໔໔] ຍ່ອມໃຫ້ຜູ້ຄົນບຳລຸງປົນເປີຕົນ ຍ້ອນງານຕົນເປັນເຫດ
ແຕ່ບໍ່ແມ່ນຍ້ອນທຳເປັນເຫດ
ສະແດງທຳຕາມທີ່ຕ່າງ ໆ ຍ້ອນເຫັນແກ່ລາບເປັນເຫດ
ແຕ່ບໍ່ແມ່ນຍ້ອນເຫັນແກ່ປະໂຫຍດ(ສູງສຸດ)ເປັນເຫດ

[໙໔໓] ຜິດກັນຖຽງກັນຍ້ອນເຫດແຫ່ງລາບທີ່ເກີດໃນສົງ
ເຫີນຫ່າງຈາກພຣະອະຣິຍະສົງ
ລ້ຽງຊີບດ້ວຍອາໄສລາບຂອງຜູ້ອື່ນ ບໍ່ມີຫິຣິ ບໍ່ລະອາຍເລີຍ

[໙໔໔] ຈິງແນວນັ້ນ ພິກຂຸລາງພວກ ເຊິ່ງບໍ່ປະພຶດຕາມສະມະນະທຳ ເປັນພຽງຄົນ
ຫົວໂລ້ນ ຄຸມຮ່າງໄວ້ດ້ວຍຜ້າກາສາວະພັດ
ປາຖະໜາແຕ່ການຍົກຍ້ອງສັນເສີນຝ່າຍດຽວ ຍັງຕິດລາບສັກກາຣະ

[໙໔໕] ເມື່ອທຳທີ່ເປັນເຄື່ອງທຳລາຍມີປະການຕ່າງ ໆ
ເປັນໄປຢູ່ຢ່າງນີ້ ດັ່ງວນີ້
ການບັນລຸຊານແລະວິປັດສະນາທີ່ຍັງບໍ່ໄດ້ບັນລຸ

ຫຼືການຄອຍຕາມຮັກສາຊານແລະວິປັດສະນາທີ່ບັນລຸແລ້ວ
ບໍ່ແມ່ນເຮັດໄດ້ງ່າຍ ໆ ຄືທີ່ເມື່ອພຣະສາດສະດາ
ຍັງຊົງພະຊົນຊີບຢູ່

[໙໔໗] ມຸນີ ເພິ່ງຕັ້ງສະຕິໃຫ້ໝັ້ນ ທ່ຽວໄປໃນໝູ່ບ້ານ
ຄືຄົນບໍ່ໃສ່ເກີບ ທ່ຽວໄປໃນບ່ອນມີໜາມ

[໙໔໘] ພຣະໂຍຄີເມື່ອຣະນຶກເຖິງວິປັດສະນາທີ່ຜາຣົບໃນການກ່ອນແລ້ວ
ຣະນຶກເຖິງຂໍ້ສຳລັບພາວະນາວິທີເຫຼົ່ານັ້ນຢູ່
ແມ່ນຈະເຖິງເວລາສຸດທ້າຍແຫ່ງຊີວິດ
ກໍເພິ່ງບັນລຸອະມະຕະບົດໃຫ້ໄດ້

(ພຣະສັງຄີຕິກາຈານ ຫວັງຈະປະກາດການປະຣິນິບພານຂອງພຣະເຖຣະ ຈຶ່ງໄດ້ກ່າວພາສິດສຸດທ້າຍນີ້ວ່າ)

[໙໔໙] ພຣະປາຣາປະຣິຍະເຖຣະ ຜູ້ເປັນສະມະນະ
ອົບຣົມອິນຊີແລ້ວ ເປັນພານ
ສະແຫວງຫາຄຸນອັນຍິ່ງໃຫຍ່ ສິ້ນພົບໃໝ່
ເມື່ອກ່າວວິທີປະຕິບັດນີ້ແລ້ວ ກໍໄດ້ປະຣິນິບພານໃນສາລະວັນ

**ວິສະຕິນິບາດ ຈົບ**

## ລວມເລື້ອງພຣະເຖຣະທີ່ມີໃນນິບາດນີ້ ຄື

໑. ພຣະອະທິມຸດຕະເຖຣະ
໒. ພຣະເຕລະການິເຖຣະ
໓. ພຣະມາລຸງກະຍະບຸດເຖຣະ
໔. ພຣະພັດທິຍະກາລິໂຄທະບຸດເຖຣະ
໕. ພຣະອະນຸຣຸດທະເຖຣະ
໖. ພຣະປາຣາປະຣິຍະເຖຣະ
໗. ພຣະຣັດຖະປາລະເຖຣະ
໘. ພຣະເສລະເຖຣະ
໙. ພຣະອົງຄຸລິມານເຖຣະ
໑໐. ພຣະປາຣາປະຣິຍະເຖຣະ[໑]

ໃນວິສະຕິນິບາດນີ້ ມີພຣະເຖຣະທີ່ທ່ານຣະບຸໄວ້ ໑໐ ຮູບຖ້ວນ

ແລະມີ ໔໔໕ ຄາຖາ ດັ່ງນີ້ແລ

# ໑໗. ຕິງສະນິບາດ

## ໑. ປຸດສະເຖຣະຄາຖາ

### ພາສິດຂອງພຣະປຸດສະເຖຣະ

(ພຣະສັງຄີຕິກາຈານໄດ້ກ່າວພາສິດເບື້ອງຕົ້ນໄວ້ວ່າ)

[໙໔໙] ລືສີປັນທະຣະສະໂຄດໄດ້ພົບເຫັນພິກຂຸຫຼາຍອົງ
ຜູ້ໜ້າເຫຼື້ອມໃສ ອົບຮົມຕົນ ສັງລວມດີແລ້ວ
ໄດ້ສອບຖາມພຣະປຸດສະເຖຣະວ່າ

[໙໕໐] ໃນການພາຍໜ້າ ພິກຂຸທັງຫຼາຍໃນພຣະສາດສະໜານີ້
ຈະມີຄວາມພໍໃຈແນວໃດ ມີຄວາມປະສົງແນວໃດ
ມີອາກັບກິຣິຍາແນວໃດ
ຂ້ານ້ອຍຮຽນຖາມທ່ານແລ້ວ ນິມົນບອກຄວາມຂໍ້ນັ້ນດ້ວຍເທີ້ນ

(ພຣະປຸດສະເຖຣະໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໙໕໑] ທ່ານປັນທະຣະສະລືສີ ເຊີນທ່ານຟັງຄຳຂອງອາດຕະມາ
ຂໍເຊີນຕັ້ງໃຈຈົດຈຳໃຫ້ດີ
ອາດຕະມາຈະບອກຂໍ້ຄວາມທີ່ທ່ານຖາມເຖິງອະນາຄົດແກ່ທ່ານ

[໙໕໒] ໃນການພາຍໜ້າ ພິກຂຸທັງຫຼາຍສ່ວນຫຼາຍ
ຈັກເປັນຜູ້ມັກໂກດ ຜູກໂກດ ລົບຫຼູ່ຄຸນທ່ານ
ຫົວດື້ ໂອ້ອວດ ຣິດສະຫຍາ ແລະມີວາທະຂັດແຍ່ງກັນ

[໙໕໓] ມີຄວາມສຳຄັນໃນສັດທຳທີ່ຍັງບໍ່ຮູ້ ບໍ່ເຫັນ ວ່າຮູ້ ວ່າເຫັນ
ມີຄວາມຄິດໃນທຳທີ່ເລິກເຊິ່ງວ່າຕື້ນ ເປັນຄົນເບົາ
ບໍ່ໜັກແໜ້ນໃນທຳ ບໍ່ເຄົາລົບກັນແລະກັນ

[໙໕໔] ໃນການພາຍໜ້າ ໂທດຫຼວງຫຼາຍ
ຈະເກີດຂຶ້ນໃນສັດໂລກ
ພິກຂຸທັງຫຼາຍຜູ້ຂາດຄວາມຄິດ
ຈະເຮັດທຳທີ່ພຣະສຳມາສຳພຸດທະເຈົ້າ
ຊົງສະແດງໄວ້ດີແລ້ວນີ້ ໃຫ້ມົວໝອງ

[໙໕໕] ທັງຈະເສື່ອມຈາກຄຸນນະທຳ ກ້າເວົ້າໃນທ່າມກາງສົງ
ມີພວກຫຼາຍ ປາກຮ້າຍ ບໍ່ຍອມຮັບຟັງ(ຄວາມຄິດເຫັນຂອງຜູ້ອື່ນ)

[໙໕໖] ຝ່າຍພວກທີ່ມີຄຸນນະທຳ
ເວົ້າໃນທ່າມກາງສົງຕາມຄວາມເປັນຈິງ
ລະອາຍໃຈ ບໍ່ຕ້ອງການຜົນປະໂຫຍດຈັກມີພວກໜ້ອຍ

[໙໕໗] ໃນການພາຍໜ້າ ພິກຂຸທັງຫຼາຍຈະມີປັນຍາຊາມ
ພາກັນຍິນດີ ເງິນ ຄຳ ໄຮ່ນາ ສວນ ແບ້ ແກະ ແລະຄົນໃຊ້ຊາຍຍິງ

[໙໕໘] ຈະເປັນຄົນອັນທະພານ ຊອບມຸ້ງແຕ່ຈະຕຳໜິຕິຕຽນ
ບໍ່ຕັ້ງໝັ້ນໃນສິນ ຖືໂຕຈັດ ໂຫດຮ້າຍ ທ່ຽວໄປ
ມັກກໍ່ການຜິດກັນ ຖຽງກັນ

[໙໕໙] ທັງຈະມີໃຈຟຸ້ງຊ່ານ ນຸ່ງຫົ່ມແຕ່ຈີວອນສີຂຽວ
ຕົວະຫຼອກລວງ ກະດ້າງ ທ່ຽວຂູເຂົາຄືມານະ
ທ່ຽວເຮັດໂຕດັ່ງພຣະອະຣິຍະ

[໙໖໐] ຈະໃຊ້ນ້ຳມັນແຕ່ງຜົມໃຫ້ງົດງາມ
ເປັນຄົນເຫຼາະແຫຼະບໍ່ໄວ້ວາງໃຈ
ໃຊ້ຢາຢອດແຕ່ງຕາ ນຸ່ງຫົ່ມຈີວອນສີງາຊ້າງ
ທ່ຽວໄປຕາມຖະໜົນຫົນທາງ

[໙໖໑] ຈະລັງກຽດຜ້າກາສາວະເຊິ່ງຍ້ອມດີແລ້ວ
ທີ່ພຣະອະຣິຍະທັງຫຼາຍບໍ່ລັງກຽດ
ເປັນທຸງໄຊຂອງພຣະອະຣະຫັນ ມັກໃຊ້ແຕ່ຜ້າຂາວ

[໙໖໒] ຈະມຸ້ງແຕ່ລາບ ຂີ້ຄ້ານ ມີຄວາມພຽນທຍ່ອນຍານ
ລັງກຽດເສນາສະນະປ່າ
ມັກຢູ່ແຕ່ເສນາສະນະໃກ້ເຮືອນ

[໙໖໓] ຈະບໍ່ສັງລວມ ທ່ຽວປະພຶດຕາມພວກພິກຂຸ
ທີ່ຍິນດີໃນມິດສາຊີບ ໄດ້ລາບຢູ່ສະເໝີ ໆ

[໙໖໔] ໃນການພາຍໜ້າ ພິກຂຸທັງຫຼາຍ

ຈະບໍ່ບູຊາຍ້ອງຍໍເຫຼົ່າພິກຂຸຜູ້ບໍ່ມີລາບ
ທັງຈະບໍ່ຄົບຄ້າສະມາຄົມກັບເຫຼົ່າພິກຂຸຜູ້ຮັກສາສິນດີ
ເຊິ່ງເປັນນັກປາດ

[໕໙໕] ຈະຫົ່ມຈີວອນສີແດງທີ່ຄົນປ່າມັກຍ້ອມໃຊ້
ພາກັນຕິຕຽນຜ້າກາສາວະເຊິ່ງເປັນທຸງໄຊຂອງຕົນ
ລາງພວກກໍຈະຫົ່ມຈີວອນສີຂາວ ເຊິ່ງເປັນທຸງໄຊຂອງພວກເດຍຣະຖີ

[໕໙໖] ໃນການພາຍໜ້າ ພິກຂຸເຫຼົ່ານັ້ນຈະບໍ່ມີຄວາມເຄົາລົບໃນຜ້າກາສາວະ
ທັງຈະບໍ່ພິຈາລະນາໃຊ້ຜ້າກາສາວະ

[໕໙໗] ການບໍ່ຄິດພິຈາລະນາໃຫ້ດີ
ໄດ້ເປັນຄວາມຊົ່ວຮ້າຍຢ່າງໃຫຍ່ຫຼວງຂອງພະຍາຊ້າງ
ທີ່ຖືກລູກສອນສຽບແທງ
ຖືກທຸກຂະເວທະນາຄອບງໍາທຸຣົນທຸຣາຍຢູ່

[໕໙໘] ຍ້ອນຄັ້ງນັ້ນ ພຣະໂພທິສັດສະເຫວີຍພຣະຊາດເປັນພະຍາຊ້າງສັດທັນ
ໄດ້ເຫັນຜ້າກາສາວະ ເຊິ່ງໂສນຸດຕະຣະພານຄຸມຮ່າງໄວ້
ທີ່ຍ້ອມດີແລ້ວເປັນທຸງໄຊຂອງພຣະອະຣະຫັນ
ໄດ້ກ່າວພາສິດທີ່ປະກອບດ້ວຍປະໂຫຍດໃນຂະນະນັ້ນແລວ່າ

[໕໙໙] ຜູ້ໃດຍັງມີກິເລດຄືນໍ້າຝາດ
ປາສະຈາກທະມະ ແລະສັດຈະ
ຈະນຸ່ງຫົ່ມຜ້າກາສາວະ
ຜູ້ນັ້ນບໍ່ຄວນທີ່ຈະນຸ່ງຫົ່ມຜ້າກາສາວະເລີຍ

[໖໐໐] ສ່ວນຜູ້ໃດເພິ່ງຄາຍກິເລດຄືນໍ້າຝາດ
ຕັ້ງໝັ້ນດີແລ້ວໃນສິນ ປະກອບດ້ວຍທະມະແລະສັດຈະ
ຜູ້ນັ້ນແລຄວນທີ່ຈະນຸ່ງຫົ່ມຜ້າກາສາວະໄດ້

[໖໐໑] ຜູ້ໃດມີສິນວິບັດ ມີປັນຍາຊາມ ບໍ່ສັງລວມອິນຊີ
ມັກເຮັດຕາມຄວາມພໍໃຈ ມີຈິດຟຸ້ງຊ່ານ ທັງບໍ່ບໍລິສຸດ
ຜູ້ນັ້ນບໍ່ຄວນທີ່ຈະນຸ່ງຫົ່ມຜ້າກາສາວະເລີຍ

[໖໐໔] ສ່ວນຜູ້ໃດສົມບູນດ້ວຍສິນ ປາສະຈາກຣາຄະ

ມີຈິດຕັ້ງໝັ້ນດີ ມີຄວາມດຳຣິໃນໃຈໃສສະອາດ
ຜູ້ນັ້ນແລ ຄວນທີ່ຈະນຸ່ງຫົ່ມຜ້າກາສາວະໄດ້

[໙໗໓] ຜູ້ທີ່ບໍ່ມີສິນ ຟຸ້ງຊ່ານ ມີມານະຫຼາຍ ເປັນຄົນພານ
ຄວນທີ່ຈະນຸ່ງຫົ່ມຜ້າຂາວທ່ານັ້ນ
ຜ້າກາສາວະຈະຊ່ອຍອັນໃດໄດ້

[໙໗໔] ໃນການພາຍໜ້າ ທັງພວກພິກຂຸແລະພິກຂຸນີ
ຜູ້ມີໃຈຊົ່ວ ບໍ່ເອື້ອເຟື້ອ
ຈະຂົ່ມຂີ່ຝ່າຍທີ່ຄົງທີ່ມີຈິດເມດຕາ

[໙໗໕] ພວກທີ່ເປັນຄົນໂງ່ຈ້າ ມີປັນຍາຊາມ
ບໍ່ສັງລວມອິນຊີ ມັກເຮັດຕາມຄວາມພໍໃຈ
ເຖິງພຣະເຖຣະທັງຫຼາຍ ຈະສອນໃຫ້ຄອງຈີວອນ ກໍຈັກບໍ່ເຊື່ອຟັງ

[໙໗໖] ພວກທ່ານເຊິ່ງເປັນຄົນໂງ່ຈ້າ
ພຣະອຸປັດຊາອາຈານສອນແນວນັ້ນ
ກໍຈະບໍ່ເຄົາລົບກັນແລະກັນ
ບໍ່ເອື້ອເຟື້ອພຣະອຸປັດຊາອາຈານ
ຄືມ້າພະຍົດບໍ່ຍອມໃຫ້ສາຣະຖີເຝິກ

[໙໗໗] ເມື່ອການພາຍຫຼັງ(ຕະຕິຍະສັງຄາຍະນາ)ຜ່ານໄປແລ້ວ
ທັງພວກພິກຂຸແລະພິກຂຸນີໃນການພາຍໜ້າ ຈັກປະຕິບັດກັນແນວນີ້

(ເມື່ອພຣະປຸດສະເຖຣະສະແດງໄພອັນໃຫຍ່ຫຼວງທີ່ຍັງມາບໍ່ເຖິງນັ້ນ ຈະມາເຖິງໃນການພາຍໜ້າ ແນວນັ້ນ ເມື່ອຈະໃຫ້ໂອວາດແກ່ພິກຂຸທັງຫຼາຍທີ່ປະຊຸມກັນ ຢູ່ບ່ອນນັ້ນອີກ ຈຶ່ງໄດ້ກ່າວ ໓ ພາ ສິດເຫຼົ່ານີ້ວ່າ)

[໙໗໘] ໄພອັນໃຫຍ່ຫຼວງທີ່ຍັງມາບໍ່ເຖິງນີ້ ຈະມາເຖິງທາງໜ້າ
ຂໍທ່ານທັງຫຼາຍຈົ່ງເປັນຜູ້ວ່າງ່າຍ ເວົ້າຈາອ່ອນຫວານ
ມີຄວາມເຄົາລົບກັນແລະກັນ

[໙໗໙] ມີຈິດເມດຕາກະລຸນາ ສັງລວມໃນສິນ
ຜາຣົບຄວາມພຽນ ມີໃຈເດັດດ່ຽວ
ບາກບັ່ນໝັ້ນຄົງເປັນປະຈຳເທີ້ນ

[໙໘໐] ຂໍຊີນທັງຫຼາຍຈິ່ງເຫັນຄວາມຜະໝາດໂດຍເປັນສິ່ງທີ່ເປັນຕາຢ້ານ
ແລະເຫັນຄວາມບໍ່ຜະໝາດໂດຍເປັນສິ່ງທີ່ກະເສມ
ແລ້ວພໍ່າເພັງອັດຖັງຄຶກະມັກທີ່ຈະບັນລຸອະມະຕະບົດ^ໄດ້
໘. ສາຣີປຸດຕະເຖຣະຄາຖາ
ພາສິດຂອງພຣະສາຣີບຸດເຖຣະ

(ພຣະສາຣີບຸດເຖຣະເມື່ອຈະພະຍາກອນພຣະອະຣະຫັດແກ່ພິກຂຸທັງຫຼາຍ ຈຶ່ງໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໙໘໑] ຜູ້ໃດມີສະຕິປະພຶດຄືຜູ້ສັງລວມກາຍ ຄືສັດຕະບຸຣຸດ
ບໍ່ຜະໝາດ ຄືຜູ້ສັງລວມຄວາມຄິດ
ຍິນດີໃນການຈະເລີນກຳມະຖານໄວ້ພາຍໃນ
ມີຈິດຕັ້ງໝັ້ນດີຢູ່ຜູ້ດຽວ ສັນໂດດ
ນັກປາດທັງຫຼາຍ ຮຽກຜູ້ນັ້ນວ່າເປັນພິກຂຸ

[໙໘໒] ພິກຂຸ ເມື່ອສັນອາຫານສົດກໍຕາມ ແຫ້ງກໍຕາມ
ບໍ່ເພິ່ງສັນໃຫ້ອີ່ມເກີນໄປ ບໍ່ເພິ່ງສັນໃຫ້ໜ້ອຍເກີນໄປ
ເພິ່ງສັນແຕ່ພໍປະມານ ເພິ່ງມີສະຕິຢູ່

[໙໘໓] ເພິ່ງເຊົາສັນກ່ອນອີ່ມ ໔-໕ ຄຳ ແລ້ວດື່ມນ້ຳ
ທີ່ນີ້ກໍພຽງພໍເພື່ອຢູ່ຜາສຸກ
ຂອງພິກຂຸຜູ້ມີໃຈເດັດດ່ຽວມຸ້ງນິບພານ

[໙໘໔] ອັນໜຶ່ງ ການນຸ່ງຫົ່ມຈີວອນທີ່ສົມຄວນ ເຊິ່ງເປັນປະໂຫຍດ
ນີ້ກໍພຽງພໍເພື່ອຢູ່ຜາສຸກ
ຂອງພິກຂຸຜູ້ມີໃຈເດັດດ່ຽວມຸ້ງນິບພານ

[໙໘໕] ເມື່ອພິກຂຸນັ່ງຂັດສະມາທິໃນກຸດຕິໃດ ຝົນຕົກບໍ່ປຽກເຂົ່າທັງສອງ
ກຸດຕິທີ່ນີ້ ກໍພຽງພໍເພື່ອຢູ່ຜາສຸກ
ຂອງພິກຂຸຜູ້ມີໃຈເດັດດ່ຽວມຸ້ງນິບພານ

[໙໘໖] ພິກຂຸໃດພິຈາລະນາເຫັນສຸກໂດຍຄວາມເປັນທຸກ
ເຫັນທຸກເປັນຄືລູກສອນຖ້າສຽບແທງໄດ້
ພິກຂຸນັ້ນ ບໍ່ໄດ້ມີຄວາມຢຶດໝັ້ນໃນອະທຸກຂະມະສຸກຂະເວທະນາທັງ ໒ ນັ້ນ

ວ່າເປັນຂອງເນື່ອງໃນຕົນ
ທ່ານຈະເພິ່ງຖືກກິເລດອັນໃດຜູກມັດໄວ້ໃນໂລກໄດ້ແນວໃດ

[໓໗໗]　ພິກຂຸຜູ້ມີຄວາມປາຖະໜາລາມົກ
ຂີ້ຄ້ານ ມີຄວາມພຽນທຍ່ອນຍານ
ມີການຮ່ຳຮຽນໜ້ອຍ ບໍ່ເອື້ອເຟື້ອ
ຢ່າໄດ້ມີໃນສຳນັກເຮົາ ໃນການໃດ ໆ ເລີຍ
(ຍ້ອນ)ຄົນເຊັ່ນນັ້ນໃນສັດໂລກ
ຈະເພິ່ງສອນແບບໃດແນວໃດໄດ້

[໓໗໘]　ສ່ວນພິກຂຸຜູ້ເປັນພະຫູສູດ ມີປັນຍາ
ຕັ້ງໝັ້ນດີໃນສີນ ປະກອບຄວາມສະງົບໃຈເນືອງ ໆ ຢູ່
ຂໍຈົ່ງມາສະຖິດຢູ່ເທິງຂະໜ່ອມຂອງເຮົາເທີ້ນ

[໓໗໙]　ພິກຂຸໃດປະກອບທຳເປັນເຫດໃຫ້ລ້າຊ້າ?ຢູ່ເນືອງ ໆ
ມີໃຈຍິນດີໃນທຳເປັນເຫດໃຫ້ລ້າຊ້າ
ພິກຂຸນັ້ນ ຊື່ວ່າພາດຈາກນິບພານ
ເຊິ່ງເປັນແດນກະເສມຈາກໂຍຄະອັນປະເສີດ

[໓໙໐]　ສ່ວນພິກຂຸໃດລະທຳເປັນເຫດໃຫ້ລ້າຊ້າໄດ້ແລ້ວ
ຍິນດີແລ້ວໃນທາງແຫ່ງທຳເຊິ່ງເປັນເຫດບໍ່ໃຫ້ລ້າຊ້າ
ພິກຂຸນັ້ນບັນລຸນິບພານ
ເຊິ່ງເປັນແດນກະເສມຈາກໂຍຄະອັນປະເສີດ

[໓໙໑]　ພຣະອະຣະຫັນທັງຫຼາຍ ຢູ່ສະຖານບ່ອນໃດ
ຄື ຈະເປັນເຮືອນກໍຕາມ ປ່າກໍຕາມ ບ່ອນຫຼຸບກໍຕາມ ບ່ອນໂນນກໍຕາມ
ສະຖານບ່ອນນັ້ນ ເປັນຣຳມະນີຍະສະຖານ

[໓໙໔]　ທ່ານຜູ້ປາສະຈາກຣາຄະທັງຫຼາຍ
ຈະຍິນດີປ່າທັງຫຼາຍ ອັນໜ້າອອນຊອນ
ທີ່ຊົນຜູ້ສະແຫວງຫາກາມບໍ່ຍິນດີ
ຍ້ອນທ່ານເຫຼົ່ານັ້ນ ບໍ່ສະແຫວງຫາກາມ

[໓໙໕]　ບຸກຄົນເພິ່ງເຫັນຜູ້ມີປັນຍາມັກຊີ້ໂທດ

ມັກເວົ້າຫ້າມໄວ້ ຄືຜູ້ຊີ້ບອກຂຸມຊັບ
(ແລະ) ເພິ່ງຄົບຜູ້ທີ່ເປັນບັນດິດເຊັ່ນນັ້ນ
ຍ້ອນເມື່ອຄົບຄົນເຊັ່ນນັ້ນ ຍ່ອມມີແຕ່ຄວາມຈະເລີນ ບໍ່ມີຄວາມເສື່ອມເລີຍ

[໙໙໔] ຜູ້ໃດເພິ່ງກ່າວສອນພໍ່າສອນ ແລະຫ້າມຈາກຄວາມຊົ່ວ
ຜູ້ນັ້ນຍ່ອມເປັນທີ່ຮັກຂອງສັດຕະບຸຣຸດທັງຫຼາຍ
ແຕ່ບໍ່ເປັນທີ່ຮັກຂອງອະສັດຕະບຸຣຸດທັງຫຼາຍ

[໙໙໕] ພຣະຜູ້ມີພຣະພາກເຈົ້າຕັດສະຣູ້ແລ້ວ ຊົງມີພຣະຈັກຂຸ
ໄດ້ຊົງສະແດງທຳໂຜດຜູ້ອື່ນ
ເມື່ອພຣະອົງຊົງສະແດງທຳຢູ່
ເຮົາມຸ້ງປະໂຫຍດ ໄດ້ຕັ້ງໃຈຟັງ
ການຕັ້ງໃຈຟັງຂອງເຮົານັ້ນ ບໍ່ຂາດປະໂຫຍດ
ຈຶ່ງເປັນຜູ້ລຸດພົ້ນແລ້ວຫາອາສະວະບໍ່ໄດ້

[໙໙໖] ເຮົາບໍ່ໄດ້ຕັ້ງຄວາມປາຖະໜາໄວ້
ເພື່ອປຸບເພນິວາສະຍານ[១] ທິບພະຈັກຂຸຍານ[២]
ເຈໂຕປະຣິຍະຍານ[៣] ອິດທິວິທະຍານ[៤]
ຈຸຕູປະປາຕະຍານ[៥] ແລະທິບພະໂສຕະຍານ[៦]

(ຍັກກ່າວພາສິດເຫຼົ່ານີ້ວ່າ)

[໙໙໗] ພຣະເຖຣະໂລ້ນຊື່ອຸປະຕິດສະນັ້ນແລ
ປະເສີດດ້ວຍປັນຍາ
ຄອງຜ້າສັງຄາຕິອາໄສເຫງົ້າໄມ້ນັ້ນເອງນັ່ງເຂົ້າຊານຢູ່

[໙໙໘] ສາວົກຂອງພຣະສຳມາສຳພຸດທະເຈົ້າເຂົ້າສະມາບັດອັນບໍ່ມີວິຕົກ
ເປັນຜູ້ປະກອບດ້ວຍຄວາມເປັນຜູ້ມິດຢ່າງປະເສີດໂດຍແທ້ຈິງ

[໙໙໙] ພູສິລາລ້ວນ ຕັ້ງໝັ້ນບໍ່ຫວັ່ນໄຫວ ແມ່ນສັນໃດ
ພິກຂຸກໍສັນນັ້ນຍ້ອນສິ້ນໂມຫະ ຍ່ອມບໍ່ຫວັ່ນໄຫວຄືພູ

(ພຣະສາຣີບຸດເຖຣະຟັງຄຳຂອງສາມະເນນນັ້ນແລ້ວ ຈຶ່ງໄດ້ກ່າວພາສິດວ່າ)

[໑໐໐໐] ຄົນຜູ້ບໍ່ມີກິເລດເຄື່ອງຍົວະຍຸ

ໃຝ່ໃຈສະແຫວງຫາຄວາມສະອາດຢູ່ປະຈຳ
ຄວາມຊົ່ວພຽງທີ່ປາຍຂົນຊາຍ
ຍ່ອມຜາກົດດັ່ງທີ່ກ້ອນກ້ອນເຝືອ

(ພຣະສາຣີບຸດເຖຣະເມື່ອຈະສະແດງວ່າຕົນມີຈິດສະເໝີກັນ ທັງຕາຍ ທັງເປັນຢູ່ ຈຶ່ງກ່າວພາສິດເຫຼົ່ານີ້ວ່າ)

[໑໐໐໑] ເຮົາບໍ່ຍາກຕາຍ ບໍ່ຍາກເປັນຢູ່
ແຕ່ເຮົາມີສະຕິສຳປະຊັນຍະຢູ່ສະເພາະໜ້າ ຈັກລະກາຍນີ້

[໑໐໐໔] ເຮົາບໍ່ຍາກຕາຍ ບໍ່ຍາກເປັນຢູ່
ແຕ່ເຮົາຖ້າເວລາອັນຄວນ
ຄືລູກຈ້າງເຮັດວຽກງານຖ້າຄ່າຈ້າງ

(ແລະເມື່ອຈະໄສະແດງທຳແກ່ຜູ້ອື່ນ ຈຶ່ງໄດ້ກ່າວໄວ້ອີກ ໔ ພາສິດວ່າ)

[໑໐໐໓] ຄວາມຕາຍນີ້ມີແນ່ນອນໃນ ໔ ເວລາ
ຄື ເວລາແກ່ແລະເວລາໜຸ່ມຈະບໍ່ຕາຍ ບໍ່ມີ

ຍ້ອນແນວນັ້ນ ທ່ານທັງຫຼາຍຈົ່ງປະຕິບັດດີປະຕິບັດຊອບ ຢ່າພິນາດເລີຍ ຂະນະຢ່າໄດ້ລ່ວງເລີຍ ທ່ານທັງຫຼາຍໄປສາ

[໑໐໐໔] ເມືອງຊາຍແດນໄດ້ຮັບການຄຸ້ມຄອງທັງພາຍໃນແລະພາຍນອກ ສັນໃດ
ທ່ານທັງຫຼາຍໂຜດຄຸ້ມຄອງຕົນໃຫ້ໄດ້ ສັນນັ້ນ
ຂະນະຢ່າໄດ້ລ່ວງເລີຍທ່ານທັງຫຼາຍໄປສາ
ຍ້ອນເຫຼົ່າຊົນທີ່ປ່ອຍໃຫ້ຂະນະລ່ວງເລີຍໄປ
ຍ່ອມແອອັດກັນໃນນະຮົກ ເສົ້າໂສກຢູ່

(ພຣະສາຣີບຸດເຖຣະ ພົບທ່ານພຣະມະຫາໂກດຖິຕະເມື່ອຈະປະກາດກຽດຕິຄຸນຂອງທ່ານ ຈຶ່ງໄດ້ ກ່າວພາສິດເຫຼົ່ານີ້ວ່າ)

[໑໐໐໕] ພິກຂຸຜູ້ສະງົບ ງົດເວັ້ນຈາກການເຮັດຊົ່ວ
ເວົ້າດ້ວຍປັນຍາ ບໍ່ຟຸ້ງຊ່ານ
ຍ່ອມກຳຈັດບາບທຳທັງຫຼາຍໄດ້
ຄືກັບລົມພັດໃບໄມ້ໃຫ້ລຸດຫຼົ່ນ

[໑໐໐໖]　ພິກຂຸຜູ້ສະງົບລະງັບ ງົດເວັ້ນຈາກການທຳຄວາມຊົ່ວ
ມັກເວົ້າດ້ວຍປັນຍາ ບໍ່ຟຸ້ງຊ່ານ
ຍ່ອມກຳຈັດບາບທຳໄດ້ແລ້ວ
ຄືກັບລົມພັດໃບໄມ້ໃຫ້ລອຍໄປ

[໑໐໐໗]　ພິກຂຸຜູ້ສະງົບລະງັບ ບໍ່ມີຄວາມຄັບແຄ້ນ
ມີໃຈຜ່ອງໃສບໍ່ຂຸ່ນມົວ ມີສີນອັນງາມ
ເປັນປາດ ເພິ່ງເຮັດບ່ອນສຸດທຸກໄດ້

(ພຣະສາຣີບຸດເຖຣະຜາຣົບພວກພິກຂຸວັດຊີບຸດທີ່ເຊື່ອພຣະເທວະທັດ ຈຶ່ງໄດ້ກ່າວພາສິດທັງຫຼາຍໄວ້ວ່າ)

[໑໐໐໘]　ບຸກຄົນບໍ່ເພິ່ງໄວ້ໃຈໃນປຸຖຸຊົນລາງພວກ
ທັງທີ່ເປັນຄະລືຫັດແລະບັນພະຊິດ
ແມ່ນເບື້ອງຕົ້ນເຂົາຈະເປັນຄົນດີ ພາຍຫຼັງຈະເປັນຄົນບໍ່ດີ
ຫຼືເບື້ອງຕົ້ນເປັນຄົນບໍ່ດີ ພາຍຫຼັງຈະກັບເປັນຄົນດີກໍຕາມ

[໑໐໐໙]　ນິວະຣະນະທຳ ໕ ເຫຼົ່ານີ້ ຄື
(໑) ກາມສັນທະ　　(໒) ພະຍາບາດ
(໓) ຖີນະມິດທະ　　(໔) ອຸດທັດຈະກຸກກຸດຈະ
(໕) ວິຈິກິດສາ
ເປັນທຳເຄື່ອງເສົ້າໝອງໃຈຂອງພິກຂຸ

[໑໐໑໐]　ສະມາທິຂອງພິກຂຸໃດຜູ້ມີປົກກະຕິຢູ່ດ້ວຍຄວາມບໍ່ຜະໝາດ
ຍ່ອມບໍ່ຫວັ່ນໄຫວດ້ວຍເຫດ ໒ ປະການ ຄື
(໑) ດ້ວຍມີຜູ້ສັກກາຣະ　(໒) ດ້ວຍບໍ່ມີຜູ້ສັກກາຣະ

[໑໐໑໑]　ພິກຂຸຜູ້ເຂົ້າຊານ ມີຄວາມພຽນຕໍ່ເນື່ອງ
ພິຈາລະນາເຫັນດ້ວຍປັນຍາທີ່ສຸຂຸມ
ຍິນດີໃນທຳເປັນທີ່ສິ້ນສຸດໄປແຫ່ງອຸປາທານ[໑]ນັ້ນ
ນັກປາດທັງຫຼາຍຮຽກວ່າ ສັດຕະບຸຣຸດ
[໑໐໑໒]　ມະຫາສະມຸດ ໑ ແຜ່ນດິນ ໑ ພູ ໑ ລົມ ໑
ບໍ່ຄວນທີ່ຈະປຽບທຽບກັບຄວາມລຸດພົ້ນອັນປະເສີດ
ຂອງພຣະສາດສະດາ

[໑໐໑໓] ພຣະເຖຣະຜູ້ປະພຶດຕາມພຣະທຳມະຈັກ
ທີ່ພຣະສາດສະດາຊົງໃຫ້ເປັນໄປ ມີປັນຍາຫຼາຍ ມີຈິດຕັ້ງໝັ້ນ
ເປັນຜູ້ສະເໝີດ້ວຍແຜ່ນດິນ ນ້ຳ ແລະໄຟ ບໍ່ຍິນດີ ຍ່ອມບໍ່ຍິນຮ້າຍ

[໑໐໑໔] ພິກຂຸເຖິງບ່ອນສຸດສາວົກປັນຍາປາຣະມີ ມີຄວາມຮູ້ຫຼາຍ ເປັນມະຫາມຸນີ
ບໍ່ໂງ່ຈ້າ ບໍ່ແມ່ນຄືຜູ້ໂງ່ຈ້າ ເປັນຜູ້ເຢັນຢູ່ປະຈຳ

[໑໐໑໕] ເຮົາປົນນິບັດພຣະສາດສະດາ
ໄດ້ເຮັດຕາມຄຳສັ່ງສອນຂອງພຣະພຸດທະເຈົ້າແລ້ວ
ປົງພາຣະທີ່ໜັກໄດ້ ຖອນຕັນຫາທີ່ນຳໄປສູ່ພົບໄດ້ຂາດແລ້ວ

[໑໐໑໖] ທ່ານທັງຫຼາຍຈົ່ງຍັງປະໂຫຍດຕົນແລະປະໂຫຍດຜູ້ອື່ນ
ໃຫ້ເຖິງພ້ອມດ້ວຍຄວາມບໍ່ພະໝາດເທີ້ນ ນີ້ເປັນຄຳພ່ຳສອນຂອງເຮົາ
ເຮົາລຸດພົ້ນຈາກກິເລດແລະພົບໄດ້ທັງໝົດແລ້ວ ຈະປະຣິນິບພານແລ

## ໖. ອານົນເຖຣະຄາຖາ

## ພາສິດຂອງພຣະອານົນເຖຣະ

(ພຣະອານົນເຖຣະ ເມື່ອສັງຄາຍະນາພຣະທຳໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໑໐໑໗] ບັນດິດບໍ່ເພິ່ງທຳຄວາມເປັນສະຫາຍກັບຄົນເວົ້າສັບສໍ່ ໑
ຄົນມັກໂກດ ໑ ຄົນຂີ້ຖີ່ ໑ ຄົນພໍໃຈທີ່ຈະໃຫ້ຜູ້ອື່ນພິນາດ ໑
ຍ້ອນການສະມາຄົມກັບຄົນຊົ່ວເປັນຄວາມຊົ່ວ ໑

[໑໐໑໘] ບັນດິດເພິ່ງທຳຄວາມເປັນສະຫາຍກັບຄົນທີ່ມີສັດທາ ໑
ມີສິນເປັນທີ່ຮັກ ໑ ມີປັນຍາ ໑ ເປັນພະຫູສູດ ໑
ຍ້ອນການສະມາຄົມກັບຄົນດີທັງຫຼາຍເປັນຄວາມຈະເລີນ

[໑໐໑໙] ຂໍເຊີນເບິ່ງອັດຕະພາບທີ່ຜ້າແລະອາພອນເປັນຕົ້ນເຮັດໃຫ້ວິຈິດ
ມີກາຍເປັນບາດ ມີກະດູກ ໓໐໐ ທ່ອນເປັນໂຄງຮ່າງ
ກະສັບກະສ່າຍ ທີ່ພວກຄົນຈ້ຳດຳຣິຫວັງກັນສ່ວນຫຼາຍ
ເຊິ່ງບໍ່ມີຄວາມໝັ້ນຍືນຕັ້ງໝັ້ນ

[໑໐໘໐] ຂໍເຊີນເບິ່ງອັດຕະພາບທີ່ສະຕີໃຊ້ແກ້ວມະນີແລະຕຸ້ມຫູແຕ່ງໃຫ້ວິຈິດ
ເຊິ່ງມີໜັງຫຸ້ມກະດູກໄວ້ພາຍໃນ ງາມພ້ອມເສື້ອຜ້າ

[໑໐໘໑] ຕີນທັງສອງຍ້ອມດ້ວຍຄັ່ງສີດ ໜ້າທາດ້ວຍຈຸນ
ກໍສາມາດເຮັດຄົນຈົ້າໃຫ້ລຸ້ມຫຼົງ
ແຕ່ບໍ່ສາມາດເຮັດຄົນທີ່ສະແຫວງຫາຝັ່ງຄືນິບພານໃຫ້ລຸ້ມຫຼົງໄດ້

[໑໐໘໒] ຜົມທີ່ຕົບແຕ່ງໃຫ້ເປັນລອນດັ່ງກະດານໝາກຣຸກ
ຕາທັງສອງທີ່ຢອດດ້ວຍຢາຢອດຕາກໍສາມາດເຮັດຄົນຈົ້າໃຫ້ລຸ້ມຫຼົງ
ແຕ່ບໍ່ສາມາດເຮັດຄົນທີ່ສະແຫວງຫາຝັ່ງຄືນິບພານໃຫ້ລຸ້ມຫຼົງໄດ້

[໑໐໘໓] ກາຍທີ່ມີສະພາບເປື່ອຍເນົ່າເປັນທຳມະດາເຊິ່ງຕົບແຕ່ງແລ້ວ
ຄືກັບຢາຢອດຕາໃໝ່ ໆ ທີ່ງົດງາມ
ກໍສາມາດເຮັດຄົນຈົ້າໃຫ້ລຸ້ມຫຼົງ
ແຕ່ບໍ່ສາມາດເຮັດຄົນສະແຫວງຫາຝັ່ງຄືນິບພານໃຫ້ລຸ້ມຫຼົງໄດ້

[໑໐໘໔] ພຣະອານົນເຖຣະຜູ້ໂຄຕະມະໂຄດ ເປັນພະຫູສູດ
ກ່າວທຳໄດ້ຢ່າງວິຈິດ ເປັນພຸດທະອຸປັດຖາກ
ປົງພາຣະໄດ້ແລ້ວ ພາກຈາກກິເລດທີ່ປະກອບສັດໄວ້
ພໍເອນກາຍລົງນອນ

[໑໐໘໕] ກໍສິ້ນອາສະວະ ພາກຈາກກິເລດທີ່ປະກອບສັດໄວ້
ລ່ວງກິເລດເປັນເຄື່ອງຂ້ອງ ດັບກິເລດໄດ້ສະນິດ
ເຖິງຝັ່ງແຫ່ງຄວາມເກີດແລະຄວາມຕາຍ
ຍັງຊົງຮ່າງກາຍ ເຊິ່ງມີໃນພົບສຸດທ້າຍຢູ່

[໑໐໘໖] ທຳທັງຫຼາຍຂອງພຣະພຸດທະເຈົ້າ
ຜູ້ຊົງເປັນເຜົ່າພັນແຫ່ງດວງອາທິດ
ຕັ້ງຢູ່ສະເພາະໃນບຸຣຸດພິເສດໃດ
ບຸຣຸດພິເສດນັ້ນ ຄືພຣະອານົນໂຄຕະມະໂຄດ
ຍັງດຳລົງຢູ່ໃນຫົນທາງເປັນທີ່ດຳເນີນໄປສູ່ນິບພານ

[໑໐໘໗] ເຮົາໄດ້ຮຽນມາຈາກພຣະພຸດທະເຈົ້າ ໘໒,000 ພຣະທຳມະຂັນ
ຈາກພິກຂຸ ໒,000 ພຣະທຳມະຂັນ
ຈຶ່ງລວມທຳທີ່ເຮົາຊ່ຳຊອງຄ່ອງປາກໄດ້ ໘໔,000 ພຣະທຳຂັນ
[໑໐໘໘] ຄົນທີ່ມີການສຶກສາໜ້ອຍນີ້ຍ່ອມແກ່ໄປເປົ່າຄືງົວພະລິພັດ[໑]
ເຂົາຈະເລີນແຕ່ເນື້ອໜັງ ສ່ວນປັນຍາບໍ່ຈະເລີນ

[໑໐໘໗] ຜູ້ທີ່ມີການສຶກສາຫຼາຍ ກັບດູໝິ່ນຜູ້ທີ່ມີການສຶກສາໜ້ອຍ
ຍ້ອນການສຶກສາເປັນເຫດ ຍ່ອມຜາກົດແກ່ເຮົາ
ຄືຄົນຕາບອດຖືດວງປະທີບໄປ

[໑໐໙໐] ບຸກຄົນເພິ່ງເຂົ້າໄປນັ່ງໃກ້ທ່ານຜູ້ເປັນພະຫູສູດ
ທັງບໍ່ຄວນເຮັດສຸຕະ[໒] ໃຫ້ເສື່ອມສູນໄປ
ຍ້ອນຄວາມເປັນພະຫູສູດນັ້ນເປັນຮາກເງົ່າຂອງພົມມະຈັນ
ສັນນັ້ນ ຈຶ່ງຄວນເປັນຜູ້ຊົງທຳ

[໑໐໙໑] ບຸກຄົນຮູ້ເບື້ອງຕົ້ນແລະເບື້ອງປາຍພາສິດ
ຮູ້ອັດຖະແຫ່ງພາສິດ ສະຫຼາດໃນນິຣຸດຕິ ແລະໃນບົດ[໓]
ຮຽນທຳໃຫ້ຮູ້ໃຫ້ເຂົ້າໃຈດີແລະພິຈາລະນາເນື້ອຄວາມ

[໑໐໙໔] ເຂົາກໍທຳຄວາມພໍໃຈດ້ວຍຄວາມອົດທົນ
ພະຍາຍາມພິຈາລະນາຮິ່ນຕອງເຖິງນາມຮູບນັ້ນ
ເລີ່ມຕັ້ງຄວາມພຽນໃນເວລາ(ທີ່ຄວນປະຄອງຈິດເປັນຕົ້ນ)
ຈຶ່ງຈະເພິ່ງເປັນຜູ້ມີຈິດຕັ້ງໝັ້ນດີໃນພາຍໃນໄດ້

[໑໐໙໓] ຜູ້ຫວັງຄວາມຮູ້ແຈ້ງທຳເພິ່ງຄົບຫາທ່ານຜູ້ເປັນພະຫູສູດ
ຊົງທຳ ມີປັນຍາ ເປັນພຸດທະສາວົກເຊັ່ນນັ້ນ

[໑໐໙໔] ບຸກຄົນຜູ້ເປັນພະຫູສູດ ຊົງທຳ
ຮັກສາຄັງທຳຂອງພຣະພຸດທະເຈົ້າຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
ຜູ້ເປັນພະຫູສູດເຊັ່ນນັ້ນເປັນດວງຕາແລະເປັນປູຊະນີຍະບຸກຄົນ
ຂອງຊາວໂລກທັງມວນ

[໑໐໙໕] ພິກຂຸມີທຳ[໑] ເປັນທີ່ມາຍິນດີ ຍິນດີແລ້ວໃນທຳ
ພິຈາລະນາພິຈາຣະນາເຖິງທຳ ຣະນຶກເຖິງທຳຢູ່
ກໍຍ່ອມບໍ່ເສື່ອມຈາກພຣະສັດທຳ

[໑໐໙໖] ພິກຂຸຜູ້ໜັກໃນຄວາມຂີ້ຖີ່ກາຍ
ເມື່ອກາຍແລະຊີວິດເສື່ອມໄປຢູ່
ທ່ານບໍ່ດຸໝັ່ນຂະຫຍັນພຽນ ຍັງຕິດຄວາມສຸກທາງກາຍ
ຈະມີຄວາມຢູ່ຜາສຸກດ້ວຍຄວາມເປັນສະມະນະໄດ້ແຕ່ບ່ອນໃດ

[໑໐໓໗] ທິດທຸກທິດ ບໍ່ຜາກົດ ທຳທັງຫຼາຍກໍບໍ່ແຈ່ມແຈ້ງແກ່ເຮົາ
ເມື່ອພຣະທຳເສນາບໍດີເຊິ່ງເປັນກັນລະຍານະມິດ ນິບພານສາແລ້ວ
ໂລກນີ້ທັງໝົດຜາກົດຄືກັບວ່າມືດມິດ
[໑໐໓໘] ກັນລະຍານະມິດເຊັ່ນນັ້ນ ຍ່ອມບໍ່ມີແກ່ຜູ້ປາສະຈາກສະຫາຍ
ຜູ້ມີພຣະສາດສະດາລ່ວງລັບເໝືອນກາຍະຄະຕາສະຕິ

[໑໐໓໙] ມິດເກົ່າ ກໍລ່ວງລັບໄປ ຈິດຂອງເຮົາບໍ່ຍອມສະມາຄົມກັບມິດໃໝ່
ມື້ນີ້ເຮົານັ້ນ ຂໍເຂົ້າຊານຢູ່ຄົນດຽວ
ຄືກັບນົກເຂົ້າຢູ່ປະຈຳຮັງໃນລະດູຝົນ

(ພຣະສາດສະດາໄດ້ຕັດກັບພຣະອານົນເຖຣະດ້ວຍພຣະພຸດທະພາສິດວ່າ)

[໑໐໔໐] ທ່ານຢ່າໄດ້ຫ້າມຊົນທັງຫຼາຍຜູ້ເປັນຊາວຕ່າງຣັດຕ່າງຖິ່ນ
ທີ່ພາກັນມາບໍ່ທັນພົບເຮົາ
ຊົນເຫຼົ່ານັ້ນເຊິ່ງມຸ້ງຟັງທຳ ຈົ່ງເຂົ້າພົບເຮົາໄດ້
ນີ້ແລເປັນເວລາເຂົ້າພົບເຮົາ

(ພຣະອານົນເຖຣະໄດ້ຟັງພຸດທະດຳຣັດນັ້ນແລ້ວ ໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໑໐໔໑] ພຣະສາດສະດາຜູ້ມີພຣະຈັກຂຸຊົງປະທານພຣະວະໂຣກາດ
ບໍ່ຊົງຫ້າມຊົນໝູ່ຫຼາຍເຊິ່ງເປັນຊາວຕ່າງຣັດຕ່າງຖິ່ນ
ທີ່ພາກັນມາບໍ່ທັນເຂົ້າເຝົ້າ

[໑໐໔໒] ເມື່ອເຮົາເປັນເສຂະບຸກຄົນຢູ່ ໒໕ ປີ ກາມສັນຍາ¹ບໍ່ໄດ້ເກີດຂຶ້ນ
ທ່ານຈົ່ງແນມເຫັນທຳວ່າເປັນທຳດີງາມ

[໑໐໔໓] ເມື່ອເຮົາເປັນເສຂະບຸກຄົນຢູ່ ໒໕ ປີ ໂທສະສັນຍາ ໒ ບໍ່ໄດ້ເກີດຂຶ້ນ
ທ່ານຈົ່ງແນມເຫັນທຳວ່າເປັນທຳດີງາມ

[໑໐໔໔] ເຮົາໄດ້ອຸປັດຖາກພຣະຜູ້ມີພຣະພາກເຈົ້າດ້ວຍເມດຕາກາຍຍະກຳ
ຄືພຣະສາຍາທີ່ຕິດຕາມພຣະອົງເປັນເວລາ ໒໕ ປີ
[໑໐໔໕] ເຮົາໄດ້ອຸປັດຖາກພຣະຜູ້ມີພຣະພາກເຈົ້າດ້ວຍເມດຕາວະຈີກຳ
ຄືພຣະສາຍາທີ່ຕິດຕາມພຣະອົງເປັນເວລາ ໒໕ ປີ
[໑໐໔໖] ເຮົາໄດ້ອຸປັດຖາກພຣະຜູ້ມີພຣະພາກເຈົ້າດ້ວຍເມດຕາມະໂນກຳ
ຄືພຣະສາຍາທີ່ຕິດຕາມພຣະອົງເປັນເວລາ ໒໕ ປີ

[໑໐໔໗] ເມື່ອພຣະພຸດທະອົງສະເດັດຈົງກົມ
ເຮົາໄດ້ຈົງກົມຕາມເບື້ອງພຣະປຣິດສະດາງຂອງພຣະອົງ
ເມື່ອພຣະອົງຊົງສະແດງທຳຢູ່ ຍານໄດ້ເກີດຂຶ້ນແກ່ເຮົາ

[໑໐໔໘] ເຮົາຍັງເປັນເສຂະມີກິດທີ່ຕ້ອງເຮັດ ຍັງບໍ່ໄດ້ບັນລຸອະຣະຫັດ
ແຕ່ພຣະສາດສະດາຜູ້ຊົງອະນຸເຄາະເຮົາ ຜາກົດວ່າປະຣິນິບພານສາແລ້ວ

[໑໐໔໙] ເວລານັ້ນ(ເຮົາ)ໄດ້ມີຄວາມສະພຶງຢ້ານ ແລະຂົນຫົວລຸກ
ໃນເມື່ອພຣະສຳມາສຳພຸດທະເຈົ້າ
ໆຜູ້ປະກອບດ້ວຍພຣະຄຸນທີ່ປະເສີດ
ໂດຍອາການທັງປວງ
ສະເດັດດັບຂັນທະປະຣິນິບພານແລ້ວ

(ພຣະທຳສັງຄາຫະກາຈານທັງຫຼາຍເມື່ອຈະສັນເສີນພຣະອານົນເຖຣະ ຈຶ່ງໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໑໐໕໐] ພຣະອານົນເຖຣະເປັນພະຫູສູດຊົງທຳ
ຮັກສາຄັງທຳຂອງພຣະພຸດທະເຈົ້າຜູ້ສະແຫວງຄຸນອັນຍິ່ງໃຫຍ່
ເປັນດວງຕາຂອງຊາວໂລກທັງມວນ
ປະຣິນິບພານສາແລ້ວ

[໑໐໕໑] ພຣະອານົນເຖຣະເປັນພະຫູສູດ ຊົງທຳ
ຮັກສາຄັງທຳຂອງພຣະພຸດທະເຈົ້າ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
ເປັນດວງຕາຂອງຊາວໂລກທັງມວນ
ກຳຈັດຄວາມມືດໃນໂລກທີ່ມືດມົນໄດ້

[໑໐໕໒] ພຣະອານົນເຖຣະ ມີຄະຕິ[໑] ມີສະຕິ ມີທິຕິ[໒]
ສະແຫວງຫາຄຸນອັນຍິ່ງໃຫຍ່
ແລະຊົງພຣະສັດທຳໄວ້
ໄດ້ເປັນບໍ່ເກີດຣັດຕະນະ[໓]

(ພຣະອານົນເຖຣະກ່ອນຈະປະຣິນິບພານ ໄດ້ກ່າວພາສິດສຸດທ້າຍວ່າ)

[໑໐໕໓] ເຮົາໄດ້ປົນນິບັດພຣະສາດສະດາ

ໄດ້ເຮັດຕາມຄຳສັ່ງສອນຂອງພຣະພຸດທະເຈົ້າ
ປົງພາຣະທີ່ໜັກໄດ້ ບັດນີ້ບໍ່ມີການເກີດອີກ

**ຕິງສະນິບາດ ຈົບ**

## ລວມເລື້ອງພຣະເຖຣະທີ່ມີໃນນິບາດນີ້ ຄື

໑. ພຣະປຸດສະເຖຣະ
໒. ພຣະສາຣີບຸດເຖຣະ
໓. ພຣະອານົນເຖຣະ

ໃນຕິງສະນິບາດນີ້ ມີພຣະເຖຣະທີ່ຣະບຸໄວ້ ໓ ອົງ

ແລະມີ ໑໐໕ ພາສິດ ດັ່ງນີ້ແລ

# ໑໗. ຈັດຕາລີສະນິບາດ

## ໑. ມະຫາກັດສະປະເຖຣະຄາຖາ

### ພາສິດຂອງພຣະມະຫາກັດສະປະເຖຣະ

(ພຣະມະຫາກັດສະປະເຖຣະໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໑໐໕໔] ບຸກຄົນບໍ່ເພິ່ງມີໝູ່ຄະນະຫ້ອມລ້ອມທ່ຽວໄປ
ຍ້ອນເປັນເຫດເຮັດໃຈໃຫ້ຟຸ້ງຊ່ານ ຍາກແກ່ການໄດ້ສະມາທິ
ການສົງເຄາະຊົນຕ່າງ ໆ ເປັນຄວາມລຳບາກ
ບຸກຄົນເຫັນໂທດດ້ວຍປະການດັ່ງນີ້ແລ້ວ
ບໍ່ເພິ່ງພໍໃຈການຄຸກຄີດ້ວຍໝູ່ຄະນະ
[໑໐໕໕] ມຸນີບໍ່ເພິ່ງກ່ຽວຂ້ອງຕະກູນທັງຫຼາຍ
ຍ້ອນເປັນເຫດເຮັດໃຈໃຫ້ຟຸ້ງຊ່ານ ຍາກແກ່ການໄດ້ສະມາທິ
ຜູ້ຂວນຂວາຍກ່ຽວຂ້ອງກັບຕະກູນນັ້ນ
ຍ່ອມຕິດໃນຣົດ ລະຖິ້ມປະໂຫຍດອັນຈະນຳຄວາມສຸກມາໃຫ້
[໑໐໕໖] ດ້ວຍວ່ານັກປາດມີພຣະພຸດທະເຈົ້າເປັນຕົ້ນ
ກ່າວການໄຫວ້ແລະການບູຊາໃນຕະກູນທັງຫຼາຍວ່າ ເປັນເປືອກຕົມ
ເປັນລູກສອນອັນລະອຽດເຊິ່ງຖອນຂຶ້ນໄດ້ຍາກ
ເປັນສັກກາຣະທີ່ຄົນຊົ່ວລະໄດ້ຍາກ

[໑໐໕໑] ເຮົາລົງຈາກເສນາສະນະແລ້ວ
ໄດ້ເຂົ້າໄປບິນທະບາດຍັງນະຄອນ
ໄດ້ເຂົ້າໄປຢືນຢູ່ໃກ້ ໆ ບຸຣຸດໂຣກເຮື້ອນ
ເຊິ່ງກຳລັງບໍຣິໂພກອາຫານນັ້ນດ້ວຍຄວາມເອື້ອເຟື້ອ

[໑໐໕໗] ບຸຣຸດໂຣກເຮື້ອນນັ້ນໃຊ້ມືຂ້າງທີ່ງິກງໍ
ນ້ອມຄຳເຂົ້າເຂົ້າມາຖວາຍເຮົາ
ແລະເມື່ອເຂົາໃສ່ຄຳເຂົ້າລົງ
ນິ້ວມືຂອງເຂົາເນົ່າເປື່ອຍກໍ່ຂາດຕົກລົງໃນບາດຂອງເຮົາ

[໑໐໕໙] ເຮົາໄດ້ອາໄສຝາເຮືອນສັນຄຳເຂົ້ານັ້ນຢູ່
ຂະນະສັນ ຫຼືສັນສຳເລັດແລ້ວ ເຮົາບໍ່ມີຄວາມລັງກຽດເລີຍ

[໑໐໖໐] ພິກຂຸໃດບໍ່ດູໝິ່ນບໍຣິໂພກປັດໃຈ ໔ ນີ້ ຄື
(໑) ອາຫານບິນທະບາດທີ່ຈະຕ້ອງລຸກຂຶ້ນຢືນຮັບ
(໒) ບັງສຸກຸນຈີວອນ
(໓) ເສນາສະນະຄືເຫງົ້າໄມ້
(໔) ຢາດອງດ້ວຍນ້ຳມູດເນົ່າ
ພິກຂຸນັ້ນແລຄວນຢູ່ໃນທິດທັງ ໔ ໄດ້

[໑໐໖໑] ໃນປັດສິມໄວ ພິກຂຸລາງພວກເມື່ອຂຶ້ນພູຍ່ອມລຳບາກ
ແຕ່ກັດສະປະເຊິ່ງເປັນທາຍາດຂອງພຣະພຸດທະເຈົ້າ
ມີສະຕິສຳປະຊັນຍະຕັ້ງໝັ້ນ ແຂງແຮງດ້ວຍກຳລັງລິດ ຍ່ອມຂຶ້ນໄດ້ສະບາຍ

[໑໐໖໒] ກັດສະປະເຊິ່ງໝົດອຸປາທານ ລະຄວາມຢ້ານກົວໄພໄດ້ແລ້ວ
ກັບຈາກບິນທະບາດແລ້ວ ໄດ້ຂຶ້ນພູ ເຂົ້າຊານຢູ່

[໑໐໖໓] ກັດສະປະເຊິ່ງໝົດອຸປາທານ ເມື່ອສັດທັງຫຼາຍຖືກໄຟໄໝ້ຢູ່
ກໍມອດໄຟໄດ້ ກັບຈາກບິນທະບາດແລ້ວ ໄດ້ຂຶ້ນພູ ເຂົ້າຊານຢູ່
[໑໐໖໔] ກັດສະປະເຊິ່ງໝົດອຸປາທານ ເຮັດກິດສຳເລັດແລ້ວ ບໍ່ມີອາສະວະ
ກັບຈາກບິນທະບາດແລ້ວ ໄດ້ຂຶ້ນພູ ເຂົ້າຊານຢູ່
[໑໐໖໕] ພູມີພາກເດຍຣະດາດໄປດ້ວຍແຖວຕົ້ນກຸ່ມ
ໜ້າອອນຊອນໃຈ ກຶກກ້ອງ ດ້ວຍສຽງຊ້າງຮ້ອງ ໜ້າອອນຊອນ
ລ້ວນແລ້ວດ້ວຍພູ ຍ່ອມເຮັດເຮົາໃຫ້ຍິນດີ

[໑໐໕໕] ພູເຫຼົ່ານັ້ນມີສີຂຽວຄືກ້ອນເມື້ອ ງົດງາມ
ມີນ້ຳເຢັນ ຊົງຄວາມສະອາດໄວ້
ເດຍລະດາດດ້ວຍແມງເຕົ່າຄຳ ຍ່ອມເຮັດເຮົາໃຫ້ອອນຊອນໃຈ

[໑໐໕໖] ພູເຫຼົ່ານັ້ນປຽບດັ່ງຜາສາດ
ຂຽວຊະອຸ່ມສູງເຈີ່ນເທີ້ນທຽມກ້ອນເມື້ອ
ກຶກດ້ວຍສຽງຊ້າງຮ້ອງ ໜ້າອອນຊອນ
ຍ່ອມເຮັດເຮົາໃຫ້ຍິນດີ

[໑໐໕໗] ພູເຫຼົ່ານັ້ນທີ່ຝົນຕົກໃສ່ໃໝ່ ໆ ມີພື້ນໜ້າອອນຊອນ
ທັງເຫຼົ່າລືສີກໍອາໄສຢູ່ ຟົດຟື້ນດ້ວຍສຽງນົກຍູງຮ້ອງ
ຍ່ອມເຮັດເຮົາໃຫ້ອອນຊອນໃຈ

[໑໐໕໘] ສະຖານທີ່ເຊັ່ນນັ້ນເໝາະແກ່ເຮົາຜູ້ມີໃຈເດັດດ່ຽວມຸ້ງເຂົ້າຊານ
ເໝາະແກ່ເຮົາຜູ້ເປັນພິກຂຸມີໃຈເດັດດ່ຽວ ມຸ້ງປະໂຫຍດ

[໑໐໖໐] ເໝາະແກ່ເຮົາຜູ້ເປັນພິກຂຸ ມີໃຈເດັດດ່ຽວ ມຸ້ງຄວາມຜາສຸກ
ເໝາະແກ່ເຮົາ ຜູ້ໝັ້ນຄົງ ມີໃຈເດັດດ່ຽວ ໝັ້ນຄົງ

[໑໐໖໑] ພູເຫຼົ່ານັ້ນມີສີສະເໝີດ້ວຍດອກຜັກຕົບ
ຄ້າຍກັບວ່າໝູ່ກ້ອນເມື້ອເທິງທ້ອງຟ້າປົກຄຸມ
ເນືອງແໜ້ນໄປດ້ວຍຝູງນົກນານາຊະນິດ ຍ່ອມເຮັດເຮົາໃຫ້ອອນຊອນໃຈ

[໑໐໖໒] ພູເຫຼົ່ານັ້ນບໍ່ມີໝູ່ຄົນສາລະວົນ
ມີແຕ່ໝູ່ເນື້ອອາໄສຢູ່
ເນືອງແໜ້ນໄປດ້ວຍຝູງນົກນານາຊະນິດ
ຍ່ອມເຮັດເຮົາໃຫ້ອອນຊອນໃຈ

[໑໐໖໓] ພູຫີນອັນກວ້າງໃຫຍ່ໄພສານມີນ້ຳໄຫຼໃສສະອາດ
ມີຝູງຄ່າງແລະຝູງໂຕຟານຈຳນວນຫຼາຍ
ເດຍລະດາດໄປດ້ວຍນ້ຳແລະສາຫຣ່າຍ ຍ່ອມເຮັດເຮົາໃຫ້ອອນຊອນໃຈຍິ່ງ

[໑໐໖໔] ຄວາມຍິນດີດ້ວຍດົນຕີມີເຄື່ອງ ໕ ເຊັ່ນນັ້ນ
ຍ່ອມບໍ່ມີແກ່ເຮົາຜູ້ມີຈິດຕັ້ງໝັ້ນ
ພິຈາລະນາເຫັນທຳໂດຍຖືກຕ້ອງ

[໑໐໗໕] ພິກຂຸບໍ່ຄວນເຮັດວຽກກໍ່ສ້າງໃຫ້ຫຼາຍ
ເພິ່ງເວັ້ນຫ່າງໝູ່ຊົນ ບໍ່ເພິ່ງຂົນຂວາຍເພື່ອລາບຜົນ
ພິກຂຸຜູ້ປະຕິບັດເຊັ່ນນັ້ນເປັນຜູ້ຂົນຂວາຍ
ໃນລາບຜົນແລະຕິດໃນຣົດອາຫານ
ຍ່ອມລະຖິ້ມປະໂຫຍດທີ່ຈະນຳຄວາມສຸກມາໃຫ້

[໑໐໗໖] ພິກຂຸບໍ່ເພິ່ງເຮັດວຽກກໍ່ສ້າງໃຫ້ຫຼາຍ
ເພິ່ງເວັ້ນຫ່າງວຽກກໍ່ສ້າງນັ້ນ
ເຊິ່ງບໍ່ນຳປະໂຫຍດມາໃຫ້ຕົນ
ຍ້ອນກາຍຈະອິດເມື່ອຍອ່ອນແຮງ
ທ່ານເຊິ່ງປະສົບຄວາມລຳບາກ
ຍ່ອມບໍ່ປະສົບຄວາມສະງົບໃຈ

[໑໐໗໗] ພິກຂຸບໍ່ພິຈາລະນາເຫັນແມ່ນປະໂຫຍດຕົນ
ດ້ວຍພຽງທ່ອງຈົ່ມພຣະພຸດທະວະຈະນະ
ຍ່ອມທ່ຽວຊູຄໍ ສຳຄັນໂຕວ່າປະເສີດກວ່າເຂົາ

[໑໐໗໘] ນໍຣະຊົນໃດບໍ່ປະເສີດເປັນພານ
ສຳຄັນຕົນວ່າປະເສີດກວ່າເຂົາ ສະເໝີເຂົາ
ທ່ານຜູ້ຮູ້ທັງຫຼາຍ ຍ່ອມບໍ່ສັນເສີນນໍຣະຊົນນັ້ນ ຜູ້ມີໃຈກະດ້າງ

[໑໐໗໙] ສ່ວນຜູ້ໃດເປັນຄົນປະເສີດກວ່າເຂົາແຕ່ບໍ່ຖືໂຕວ່າ
ປະເສີດກວ່າເຂົາ ສະເໝີເຂົາ ຫຼືວ່າຊົ່ວກວ່າເຂົາ
ບໍ່ຫວັ່ນໄຫວດ້ວຍມານະຈັກຢ່າງໜຶ່ງໃນ ໙ ຢ່າງ

[໑໐໘໐] ທ່ານຜູ້ຮູ້ທັງຫຼາຍຍ່ອມສັນເສີນຜູ້ນັ້ນນັ້ນແລວ່າ
ມີປັນຍາ ໝັ້ນຄົງ ເຊັ່ນນັ້ນ ຕັ້ງໝັ້ນດີໃນສິນທັງຫຼາຍ
ພ່ຳເພັງຄວາມສະງົບໃຈຢູ່ເນືອງ ໆ

[໑໐໘໑] ຜູ້ໃດບໍ່ມີຄວາມເຄົາລົບໃນເພື່ອນພົມມະຈາຣີທັງຫຼາຍ
ຜູ້ນັ້ນຍ່ອມຫ່າງໄກຈາກພຣະສັດທຳ ຄືຟ້າກັບດິນ

[໑໐໘໒] ກໍເຫຼົ່າພິກຂຸມີຫິຣິແລະໂອດຕັບປະຕັ້ງໝັ້ນໂດຍຖືກຕ້ອງທຸກເມື່ອ
ມີພົມມະຈັນງອກງາມ ຍ່ອມເປັນຜູ້ມີພົບໃໝ່ໝົດແລ້ວ

[໑໐໗໓] ພິກຂຸທີ່ຍັງມີຈິດຟຸ້ງຊ່ານ ກັບກອກ
ເຖິງຈະຫົ່ມຜ້າບັງສຸກຸນ ກໍຍ່ອມບໍ່ງົດງາມດ້ວຍຜ້າບັງສຸກຸນນັ້ນ
ຄືວານອນທີ່ຄຸມດ້ວຍໜັງຣາດຊະສີ ບໍ່ງົດງາມ

[໑໐໗໔] ສ່ວນພິກຂຸຜູ້ມີຈິດບໍ່ຟຸ້ງຊ່ານ ບໍ່ກັບກອກ
ມີປັນຍາຮັກສາຕົນລອດ ສັງລວມອິນຊີ
ຍ່ອມງົດງາມດ້ວຍຜ້າບັງສຸກຸນ ຄືຣາດຊະສີທີ່ຮ່ອມພູສັນນັ້ນ

[໑໐໗໕] ອຸບັດເທບມີລິດ ມີກຽດຕິຍົດ
ມີຈຳນວນຫຼາຍເຖິງ ໑໐,໐໐໐ ເຫຼົ່ານີ້
ແລະໝູ່ພົມທັງໝົດນັ້ນ

[໑໐໗໖] ພາກັນມາຢືນປະນົມມື
ນອບນ້ອມທ່ານພຣະທຳເສນາບໍດີສາຣີບຸດຜູ້ເປັນປາດ
ເຂົ້າຊານສະມາບັດໄດ້ຢ່າງອຸກກິດ
ມີຈິດຕັ້ງໝັ້ນ ພ້ອມກັບເປ່ງວາຈາວ່າ

[໑໐໗໗] ຂ້າແດ່ທ່ານຜູ້ເປັນບຸຣຸດອາຊາໄນ ຂໍຄວາມນອບນ້ອມຈົ່ງມີແດ່ທ່ານ
ຂ້າແດ່ທ່ານຜູ້ເປັນບຸຣຸດສູງສຸດ ຂໍຄວາມນອບນ້ອມຈົ່ງມີແດ່ທ່ານ
ທີ່ພວກເຮົາບໍ່ຮູ້ວ່າ ທ່ານອາໄສອາລົມໃດນໍ ເຖິງເຂົ້າຊານຢູ່

[໑໐໗໘] ໜ້າອັດສະຈັນແທ້ນໍ
ວິໄສສະເພາະໂຕຂອງທ່ານຜູ້ຮູ້ທັງຫຼາຍເລີກເຊິ່ງຍິ່ງ
ພວກເຮົາຜູ້ສາມາດທີ່ຈະຮູ້ວິໄສແມ່ນທີ່ລະອຽດ
ຄືນາຍຂະມັງທະນູຜູ້ຍິງຂົນຊາຍໄດ້ມາປະຊຸມກັນແລ້ວ ກໍຍັງຮູ້ບໍ່ໄດ້

[໑໐໗໙] ຍ້ອນໄດ້ເຫັນທ່ານພຣະສາຣີບຸດຜູ້ຄວນແກ່ການບູຊາ
ເຊິ່ງໝູ່ທວຍເທບບູຊາແລ້ວແນວນັ້ນໃນຄັ້ງນັ້ນ
ທ່ານພຣະກັບປິນະຈຶ່ງໄດ້ມີຄວາມຍິ້ມແຍ້ມ
[໑໐໘໐] ທົ່ວພຸດທະອານາເຂດ ຍົກເວັ້ນພຣະມະຫາມຸນີສາ
ເຮົາໄດ້ເປັນຜູ້ປະເສີດໃນທຸດົງຄະຄຸນ ບໍ່ມີໃຜທຽບທໍ່ເຮົາ
[໑໐໘໑] ເຮົາປົນນິບັດພຣະສາດສະດາ
ໄດ້ເຮັດຕາມຄຳສັ່ງສອນຂອງພຣະພຸດທະເຈົ້າແລ້ວ
ປົງພາຣະທີ່ໜັກໄດ້ແລ້ວ ຖອນຕັນຫາທີ່ນຳໄປສູ່ພົບໄດ້ຂາດແລ້ວ

[໑໐໗໔] ພຣະໂຄດົມຜູ້ຊົງພຣະຄຸນຫາປະມານບໍ່ໄດ້
ມີພຣະຫະໄທນ້ອມໄປໃນເນກຂໍາມະ
ສະລັດອອກຈາກພົບ ໓
ບໍ່ຊົງຕິດຈີວອນ ບິນທະບາດ ເສນາສະນະ
ຄືດອກບົວຂາດມົນທິນບໍ່ຕິດນໍ້າສັນນັ້ນ

[໑໐໗໓] ພຣະອົງເປັນຈອມປາດ
ມີສະຕິປັດຖານເປັນພຣະສໍ
ມີສັດທາເປັນພຣະຫັດ
ມີປັນຍາເປັນພຣະສຽນ
ຊົງມີພຣະປີຊາຫຼາຍ
ຊົງປະຕິບັດດັບກິເລດແລະກອງທຸກໄດ້ຕະຫຼອດໄປ
ຈັດຕາລີສະນິບາດ ຈົບບໍລິບູນ

## ລວມເລື້ອງພຣະເຖຣະທີ່ມີໃນນິບາດນີ້ ຄື

໑. ພຣະມະຫາກັດສະປະເຖຣະຮູບດຽວທໍ່ນັ້ນ

ແລະໃນຈັດຕາລີສະນິບາດມີ ໔໐ ຄາຖາ ດັ່ງນີ້ແລ

# ໑໙. ປັນຍາສະນິບາດ

## ໑. ຕາລະປຸຕະເຖຣະຄາຖາ

### ພາສິດຂອງພຣະຕາລະປຸຕະເຖຣະ

(ພຣະຕາລະປຸຕະເຖຣະຫວັງ ຈະຈຳແນກສະແດງໂຍນິໂສມະນະສິການ ໂດຍປະການຕ່າງ ໆ ຈຶ່ງໄດ້ກ່າວສອນພິກຂຸທັງຫຼາຍດ້ວຍພາສິດເຫຼົ່ານີ້ວ່າ)

[໑໐໙໔] ເມື່ອໃດນໍ ເຮົາຈະຢູ່ຜູ້ດຽວບໍ່ມີຕັນຫາເປັນເພື່ອນທີ່ຮ່ອມພູ
ເມື່ອໃດນໍເຮົາຈະພິຈາລະນາເຫັນແຈ້ງພົບທັງປວງໂດຍເປັນສະພາວະບໍ່ທ່ຽງຢູ່
ເມື່ອໃດນໍຄວາມດຳຣິແນວນີ້ນັ້ນຂອງເຮົາຈະສຳເລັດໄດ້

[໑໐໙໕] ເມື່ອໃດນໍເຮົາຈະໄດ້ເປັນມຸນີ
ນຸ່ງຫົ່ມຜ້າກາສາວະພັດທີ່ຕັດດ້ວຍສັດຕາ
ບໍ່ຍຶດໝັ້ນ ບໍ່ມີຄວາມຫວັງ ລະຣາຄະ ໂທສະ
ແລະໂມຫະໄດ້ແລ້ວ ທ່ຽວ ໄປໃນປ່າໃຫຍ່ຢູ່ໄດ້ຢ່າງສະບາຍ

[໑໐໙໖] ເມື່ອໃດນໍ ເຮົາຈຶ່ງຈະເຫັນແຈ້ງຮ່າງກາຍນີ້ເຊິ່ງບໍ່ທ່ຽງ
ເປັນຮັງແຫ່ງຄວາມຕາຍແລະເປັນຮັງແຫ່ງພະຍາດ
ຖືກມໍລະນະແລະຊະຣາຄອຍລົບກວນ
ປາສະຈາກຄວາມຢ້ານ ອາໄສຢູ່ໃນປ່າແຕ່ຜູ້ດຽວ
ຄວາມນຶກແນວນີ້ນັ້ນຂອງເຮົາຈະສຳເລັດເມື່ອໃດນໍ

[໑໐໙໗] ເມື່ອໃດນໍເຮົາເພິ່ງຈັບດາບຄົມກິບຄືອະຣິຍະມັກທີ່ສຳເລັດດ້ວຍປັນຍາ
ຕັດເຄືອເຂົາຄືຕັນຫາທີ່ກໍ່ໃຫ້ເກີດໄພ ນຳທຸກມາໃຫ້
ເປັນເຫດໃຫ້ໝຸນວົນວຽນໄປຕາມອາລົມຫຼາຍແນວ
ຄວາມນຶກແນວນີ້ນັ້ນຂອງເຮົາຈະສຳເລັດເມື່ອໃດນໍ

[໑໐໙໘] ເມື່ອໃດນໍເຮົາຈະໄດ້ຈັບອາວຸດທີ່ສຳເລັດດ້ວຍປັນຍາ
ອັນມີເດຊານຸພາບຫຼາຍຂອງທ່ານຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ທັງຫຼາຍ
ຫັກຮານກິເລດມານພ້ອມທັງເສນາມານໂດຍທັນທີ ເໜືອບັນລັງສີຫະອາດ[១]
ຄວາມນຶກແນວນີ້ນັ້ນຂອງເຮົາຈະສຳເລັດເມື່ອໃດນໍ

[໑໐໙໙] ເມື່ອໃດນໍສັດຕະບຸຣຸດຜູ້ມີຄວາມໜັກແໜ້ນໃນທຳ
ໝັ້ນຄົງ ມີປົກກະຕິເຫັນຕາມຄວາມເປັນຈິງ ຊະນະອິນຊີແລ້ວ
ຈະເພິ່ງເຫັນເຮົາວ່າ ພໍ່າເພັງພຽນໃນສະມາຄົມ
ຄວາມນຶກແນວນີ້ນັ້ນຂອງເຮົາຈະສຳເລັດເມື່ອໃດນໍ

[໑໑໐໐] ເມື່ອໃດນໍຄວາມຂີ້ຄ້ານ ຄວາມຫິວກະຫາຍ
ລົມ ແດດ ຫຼືເຮືອດ ຍຸງ ສັດເລືອຄານ
ຈະບໍ່ບຽດບຽນເຮົາທີ່ຮ່ອມພູ ນີ້ເປັນຄວາມປະສົງສ່ວນໂຕເຮົາ
ຄວາມນຶກແນວນີ້ນັ້ນຂອງເຮົາຈະສຳເລັດເມື່ອໃດນໍ

[໑໑໐໑] ເມື່ອໃດນໍເຮົາຈຶ່ງຈະໄດ້ເປັນຜູ້ມີຈິດຕັ້ງໝັ້ນ ມີສະຕິ
ບັນລຸອະຣິຍະສັດ ໔ ທີ່ເຫັນໄດ້ແສນຍາກ
ເຊິ່ງພຣະສຳມາສຳພຸດທະເຈົ້າຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
ຊົງຮູ້ແລ້ວດ້ວຍພຣະປັນຍາ
ຄວາມນຶກແນວນີ້ນັ້ນຂອງເຮົາຈະສຳເລັດເມື່ອໃດນໍ

[໑໑໐໒] ເມື່ອໃດນໍ ເຮົາຈະມີຄວາມສະງົບລະງັບຈາກເຄື່ອງຮ້ອນຮົນ
ຍ້ອນຮູບ ສຽງ ກິ່ນ ຣົດ ໂຜດຖັບພະ ແລະທຳມາຣົມ
ທີ່ເຮົາຍັງບໍ່ຮູ້ເທົ່າທັນ ພິຈາລະນາເຫັນໄດ້ດ້ວຍປັນຍາ
ຄວາມນຶກແນວນີ້ນັ້ນຂອງເຮົາຈະສຳເລັດເມື່ອໃດນໍ

[໑໑໐໓] ເມື່ອໃດນໍເຮົາຖືກວ່າກ່າວຕິຕຽນດ້ວຍຄຳຫຍາບ
ຈະບໍ່ເດືອດຮ້ອນໃຈ ຍ້ອນຄຳຫຍາບນັ້ນເປັນເຫດ
ເຖິງໄດ້ຮັບການສັນເສີນ ກໍຈະບໍ່ຍິນດີ
ຍ້ອນການສັນເສີນນັ້ນເປັນເຫດ
ຄວາມນຶກແນວນີ້ນັ້ນຂອງເຮົາຈະສຳເລັດເມື່ອໃດນໍ

[໑໑໐໔] ເມື່ອໃດນໍເຮົາເພິ່ງເຫັນສະພາບພາຍໃນ
ຄື ປັນຈະຂັນຂອງເຮົາເຫຼົ່ານີ້ ຮູບປະທຳທີ່ຍັງບໍ່ຮູ້
ແລະສະພາບພາຍນອກ ຄື ຂອນໄມ້ ກໍຫຍ້າ
ແລະລະດາວັນ ວ່າເປັນສະພາບສະເໝີກັນ
ຄວາມນຶກແນວນີ້ນັ້ນຂອງເຮົາຈະສຳເລັດເມື່ອໃດນໍ

[໑໑໐໕] ເມື່ອໃດນໍ ນ້ຳຝົນໃໝ່ຕາມລະດູໃນເວລາໃກ້ຮຸ່ງ

ຈະຕຶກທຶດເຮົາຜູ້ຄອງຜ້າຈີວອນດຳເນີນໄປໃນມັກຄາ?
ທີ່ທ່ານຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ດຳເນີນໄປຢູ່ໃນປ່າ
ຄວາມນຶກແນວນີ້ນັ້ນຂອງເຮົາຈະສຳເລັດເມື່ອໃດນໍ

[໑໑໐໖] ເມື່ອໃດນໍເຮົາເພິ່ງໄດ້ຍິນສຽງຮ້ອງຂອງນົກຍຸງທີ່ຮ່ອມພູໃນປ່າ
ແລ້ວລຸກຂຶ້ນພິຈາລະນາເພື່ອບັນລຸອະມະຕະທຳ
ຄວາມນຶກແນວນີ້ນັ້ນຂອງເຮົາຈະສຳເລັດເມື່ອໃດນໍ

[໑໑໐໗] ເມື່ອໃດນໍເຮົາຈະເພິ່ງຂ້າມພົ້ນແມ່ນ້ຳຄົງຄາ
ຍະມຸນາ ສຸຣັດວະດີ ທີ່ໄຫຼໄປເຖິງບາດານ
ມີປາກອ່າວໃຫຍ່ທັງເປັນຕາຢ້ານ ໄປໄດ້ດ້ວຍລິດ ບໍ່ຕິດຂັດ
ຄວາມນຶກແນວນີ້ນັ້ນຂອງເຮົາຈະສຳເລັດເມື່ອໃດນໍ

[໑໑໐໘] ເມື່ອໃດນໍເຮົາຈະເພິ່ງງົດເວັ້ນນິມິດວ່າງາມທັງປວງໄດ້
ຂົ້ນຂວາຍໃນຊານແລ້ວ
ທຳລາຍຄວາມພໍໃຈໃນກາມມະຄຸນທັງຫຼາຍ
ຄືຊ້າງທຳລາຍເສົາຕະລຸງ ແລະໂຊ່ເຫຼັກໄດ້ແລ້ວທ່ຽວໄປໃນສົງຄາມ
ຄວາມນຶກແນວນີ້ນັ້ນຂອງເຮົາຈະສຳເລັດເມື່ອໃດນໍ

[໑໑໐໙] ເມື່ອໃດນໍ ເຮົາຈິ່ງຈະໄດ້ບັນລຸຄຳສອນຂອງພຣະພຸດທະເຈົ້າ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ໄດ້ແລ້ວ
ພໍໃຈຄືລູກໜີ້ຜູ້ຂັດສົນຖືກເຈົ້າໜີ້ບີບບັງຄັບ ສະແຫວງຫາຊັບມາໄດ້ກໍເພິ່ງພໍໃຈ
ຄວາມນຶກແນວນີ້ນັ້ນຂອງເຮົາຈະສຳເລັດເມື່ອໃດນໍ

[໑໑໑໐] (ຈິດຜູ້ຈະເລີນ) ທ່ານອ້ອນວອນເຮົາມາເປັນເວລາຫຼາຍປີວ່າ
ທ່ານບໍ່ສົມຄວນຢູ່ຄອງເຮືອນເລີຍ
ບັດນີ້ເຮົານັ້ນກໍໄດ້ບວດສົມປະສົງແລ້ວ
ເປັນຫຍັງ ທ່ານຈິ່ງບໍ່ນຳພາສານໍ

[໑໑໑໑] ຈິດຜູ້ຈະເລີນ ທ່ານອ້ອນວອນເຮົາມາແລ້ວບໍ່ແມ່ນບໍວ່າ
ຝູງນົກຍູງມີຂົນປີກແພວພາວ
ແລະສຽງກຶກກ້ອງແຫ່ງສາຍນ້ຳຕົກຕາມຮ່ອມພູ
ຈະເຮັດທ່ານຜູ້ເຂົ້າຊານຢູ່ໃນປ່າໃຫ້ເພີດເພີນ

[໑໑໑໔] ເຮົາຍອມສະລະຍາດມິດອັນເປັນທີ່ຮັກໃນສະກຸນ
ຄວາມຍິນດີໃນການຫຼິ້ນ ແລະກາມມະຄຸນໃນໂລກໄດ້ໝົດແລ້ວ
ເຂົ້າມາເຖິງປ່ານີ້
ທ່ານຊ່າງບໍ່ຍິນດີກັບເຮົາເລີຍເນາະຈິດ

[໑໑໑໓] ເຮົາເມື່ອພິຈາລະນາເຫັນວ່າ ຍ້ອນຈິດນີ້ເປັນຂອງເຮົາທີ່ນັ້ນ
ດັ່ງນັ້ນ ທ່ານຈຶ່ງບໍ່ແມ່ນຂອງຜູ້ອື່ນ
ການຮ້ອງໄຫ້ຮ່ຳໄຮຈະມີປະໂຫຍດອັນໃດ
ໃນເວລາເຮັດສົງຄາມກັບກິເລດມານ
ຈິດທັງໝົດນີ້ມີແຕ່ຫວັ່ນໄຫວດັ່ງນີ້
ຈຶ່ງໄດ້ອອກບວດສະແຫວງຫາອະມະຕະບົດ

[໑໑໑໔] ພຣະສຳມາສຳພຸດທະເຈົ້າຜູ້ປະເສີດເໜືອເທວະດາແລະມະນຸດທັງຫຼາຍ
ເປັນຈອມທ້າວສັກກະເທວະຣາດ ເປັນຈອມສາຣະຖີເຝິກນະຣະໄດ້
ຕັດສຸພາສິດໄວ້ວ່າ ຈິດນີ້ກວັດແກວ່ງຄືລີງ
ທັງຫ້າມໄດ້ແສນຍາກ ຍ້ອນບໍ່ປາສະຈາກຄວາມກຳໜັດ

[໑໑໑໕] ຍ້ອນເຫຼົ່າປຸຖຸຊົນທີ່ຍັງບໍ່ຮູ້ເທົ່າທັນ
ພົວພັນຢູ່ໃນກາມທັງຫຼາຍທີ່ງົດງາມ ມີຣົດຫວານ
ຊວນໃຫ້ອອນຊອນໃຈ ພວກເຂົາສະແຫວງຫາພົບໃໝ່
ກໍ່ແຕ່ສິ່ງທີ່ຂາດປະໂຫຍດ
ຖືກຈິດເຮັດໃຫ້ເຫີນຫ່າງຈາກສຸກ ນຳໄປໄວ້ໃນນະຮົກ ຍ່ອມປະສົບທຸກ

[໑໑໑໖] ຈິດ ແຕ່ກ່ອນ ທ່ານແນະນຳເຮົາວ່າ
ທ່ານມີເສືອເຫຼືອງແລະເສືອໂຄ່ງຫ້ອມລ້ອມຢູ່ໃນປ່າ
ທີ່ມີສຽງນົກຍູງແລະນົກກະໄນຮ່ຳຮ້ອງ
ຈົ່ງລະຄວາມຫ່ວງໃຍໃນຮ່າງກາຍ ຢ່າໄດ້ພາດຫວັງສາເລີຍ

[໑໑໑໗] ຈິດ ແຕ່ກ່ອນ ທ່ານແນະນຳເຮົາວ່າ
ທ່ານຈົ່ງຈະເລີນຊານ ອິນຊີ ພະລະ ໂພດຊົງ ແລະສະມາທິພາວະນາ
ທັງບັນລຸວິດຊາ ໓ ໃນພຣະພຸດທະສາດສະໜາໃຫ້ໄດ້

[໑໑໑໘] ຈິດ ແຕ່ກ່ອນ ທ່ານແນະນຳເຮົາວ່າ
ທ່ານຈົ່ງຈະເລີນມັກມີອົງ ໘ ທີ່ນຳສັດອອກຈາກວັດຕະທຸກ

ຍັງເຖິງຄວາມສິ້ນທຸກທັງມວນ ຊຳຮະລ້າງກິເລດໄດ້ໝົດສິ້ນ
ເພື່ອບັນລຸນິບພານໃຫ້ໄດ້

[໑໑໗໙] ຈິດ ແຕ່ກ່ອນ ທ່ານແນະນຳເຮົາວ່າ
ທ່ານຈົ່ງພິຈາລະນາເຫັນປັນຈະຂັນໂດຍອຸບາຍທີ່ແຍບຄາຍວ່າ ເປັນທຸກ
ຈົ່ງລະເຫດໃຫ້ເກີດທຸກ ແລະຈົ່ງທຳຄວາມສິ້ນທຸກໃນອັດຕະພາບນີ້ແລໃຫ້ໄດ້

[໑໑໘໐] ຈິດ ແຕ່ກ່ອນ ທ່ານແນະນຳເຮົາວ່າ
ທ່ານຈົ່ງພິຈາລະນາປັນຈະຂັນໂດຍອຸບາຍທີ່ແຍບຄາຍວ່າ
ບໍ່ທ່ຽງ ເປັນທຸກ
ວ່າ ວ່າງເປົ່າ ບໍ່ມີໂຕຕົນ
ແລະວ່າ ຕ້ອງວິບັດໄປ ເປັນຜູ້ຂ້າ
ຈົ່ງດັບມະໂນວິຈານທາງໃຈສາໃຫ້ໄດ້

[໑໑໘໑] ຈິດ ແຕ່ກ່ອນ ທ່ານແນະນຳເຮົາວ່າ
ທ່ານຈົ່ງແຖຜົມແລະແຖໜວດແລ້ວ ຖືເພດສະມະນະ
ມີຮູບຮ່າງແປກ ຖືກເຂົາສາບແຊ່ງ
ຖືບາດທ່ຽວພິກຂາໄປຕາມຕະກູນທັງຫຼາຍ
ຈົ່ງພາກພຽນໃນຄຳສອນຂອງພຣະສາດສະດາ
ຜູ້ຊົງສະແຫວງຫາຄຸນອັນຍິ່ງໃຫຍ່ໃຫ້ໄດ້

[໑໑໘໒] ຈິດ ແຕ່ກ່ອນ ທ່ານແນະນຳເຮົາວ່າ
ທ່ານຈົ່ງສັງລວມລະວັງໃຫ້ດີ ເມື່ອທ່ຽວໄປໃນລະຫວ່າງຮ່ອມ
ຢ່າມີໃຈກ່ຽວຂ້ອງໃນຕະກູນ
ແລະກາມາຣົມທັງຫຼາຍທ່ຽວໄປ
ຄືດວງຈັນມື້ເພັງທີ່ປາສະຈາກກ້ອນເຝື້ອສັນນັ້ນ

[໑໑໘໓] ຈິດ ແຕ່ກ່ອນ ທ່ານແນະນຳເຮົາວ່າ
ທ່ານຈົ່ງຍິນດີໃນທຸດົງຄະຄຸນທັງ ໕ ຄື
(໑) ຖືການຢູ່ປ່າເປັນຂໍ້ວັດປະຕິບັດ
(໒) ຖືການທ່ຽວບິນທະບາດເປັນຂໍ້ວັດປະຕິບັດ
(໓) ຖືການຢູ່ປ່າຊ້າເປັນຂໍ້ວັດປະຕິບັດ
(໔) ຖືການນຸ່ງຫົ່ມຜ້າບັງສຸກຸນເປັນຂໍ້ວັດປະຕິບັດ
(໕) ຖືການບໍ່ນອນເປັນຂໍ້ວັດປະຕິບັດທຸກເມື່ອໃຫ້ໄດ້

[໑໑໘໔] ບຸກຄົນລາງຄົນຕ້ອງການໝາກໄມ້ ປູກຕົ້ນໄມ້ໃຫ້ໝາກໄວ້ແລ້ວ
ບໍ່ໄດ້ຮັບໝາກ ປະສົງຈະປ້ຳຕົ້ນໄມ້ນັ້ນສາ ສັນໃດ
ຈິດ ທ່ານເຮັດເຮົາ ທີ່ທ່ານນຳພາໃຫ້ຫວັ່ນໄຫວໃນຄວາມບໍ່ທ່ຽງ
ໃຫ້ເປັນຄືບຸກຄົນຜູ້ປູກຕົ້ນໄມ້ສັນນັ້ນ

[໑໑໘໕] ຈິດ ທີ່ບໍ່ມີຮູບຮ່າງ ໄປໄດ້ໄກ ທັງທ່ຽວໄປແຕ່ຜູ້ດຽວ
ບັດນີ້ ເຮົາຈະບໍ່ເຮັດຕາມຄຳຂອງທ່ານ
ຍ້ອນກາມທັງຫຼາຍ ລ້ວນແຕ່ກໍ່ໃຫ້ເກີດທຸກ ໃຫ້ຜົນເຜັດຮ້ອນ
ມີໄພອັນໃຫຍ່ຫຼວງ
ເຮົາຈະປະພຶດມຸ້ງໝັ້ນຢູ່ສະເພາະນິບພານ

[໑໑໘໖] ເຮົາບໍ່ໄດ້ອອກບວດຍ້ອນບໍ່ມີບຸນ ຍ້ອນໝົດຄວາມກະດາກອາຍ
ຍ້ອນຕົກຢູ່ພາຍໃຕ້ອຳນາດຈິດ ຍ້ອນເຮັດຜິດຕໍ່ຊາດບ້ານເມືອງ
ກໍຫຼືຍ້ອນເຫດແຫ່ງອາຊີບ
ຈິດ ກໍທ່ານໄດ້ຮັບຮອງກັບເຮົາໄວ້ວ່າ ຈະຢູ່ໃນອຳນາດເຮົາບໍ່ແມ່ນບໍ

[໑໑໘໗] ຈິດ ທ່ານແນະນຳເຮົາໄວ້ເວລານັ້ນແລວ່າ
ຄວາມເປັນຜູ້ມັກໜ້ອຍ ການລະຄວາມລົບຫຼູ່ຄຸນທ່ານ
ແລະຄວາມສະງົບທຸກ ສັດຕະບຸຣຸດທັງຫຼາຍສັນເສີນ
ມາບັດນີ້ ທ່ານກັບປະພຶດຄືເກົ່າ

[໑໑໘໘] ເຮົາບໍ່ອາດກັບໄປຫາຕັນຫາ ອະວິດຊາ
ຄວາມຮັກ ຄວາມຊັງ ຮູບອັນສວຍງາມ ສຸກຂະເວທະນາ
ແລະກາມມະຄຸນທີ່ໜ້າພໍໃຈ ເຊິ່ງຄາຍໄດ້ແລ້ວ

[໑໑໘໙] ຈິດ ເຮົາໄດ້ເຮັດຕາມຄຳຂອງທ່ານມາທຸກພົບ ທຸກຊາດ
ທຸກຄະຕິ ແລະທຸກວິນຍານຖິຕິ
ເຮົາບໍ່ໄດ້ຂຸ່ນເຄືອງທ່ານໃນຫຼາຍຊາດ
ຍ້ອນຄວາມທີ່ທ່ານເປັນຄົນກະຕັນຍູ ຈຶ່ງເກີດມີອັດຕະພາບນີ້ຂຶ້ນ
ທັງເຮົາກໍໄດ້ພະເນຈອນໄປໃນທຸກ ທີ່ທ່ານເຮັດໃຫ້ມາດົນນານ

[໑໑໙໐] ຈິດ ທ່ານນັ້ນແລເຮັດເຮົາໃຫ້ເປັນພາມແດ່
ໃຫ້ເປັນກະສັດແດ່ ເປັນພຣະຣາຊາແດ່
ຍ້ອນອຳນາດແຫ່ງທ່ານນັ້ນແລ

ບາງເວລາເຮົາເປັນແພດແດ່
ເປັນສູດແດ່ ເປັນເທບແດ່

[໑໑໓໑] ຍ້ອນເຫດແຫ່ງທ່ານ ຍ້ອນອຳນາດແຫ່ງທ່ານ
ມີທ່ານເປັນມູນເຫດ ບາງເວລາເຮົາເປັນອະສູນແດ່
ເປັນສັດນະຮົກແດ່ ເປັນສັດເດຍຣັດສານແດ່ ເປັນເຜດແດ່

[໑໑໓໔] ທ່ານປະທຸດສະຮ້າຍເຮົາມາແລ້ວຫຼາຍເທື່ອບໍ່ແມ່ນບໍ
ທ່ານສະແດງນ້ຳໃຈຄືຈະຫ້າມເຮົາ
ບຶດດຽວທ່ານກໍລໍ້ລວງຄືກັບຄົນບ້າ
ຈິດ ເຮົາໄດ້ຜິດອັນໃດຕໍ່ທ່ານໄວ້ແດ່

[໑໑໓໓] ແຕ່ກ່ອນຈິດນີ້ໄດ້ທ່ອງທ່ຽວໄປຕາມອາລົມຕ່າງ ໆ
ຕາມຄວາມປາຖະໜາ ຕາມຄວາມຕ້ອງການ ຕາມຄວາມສະບາຍ
ມື້ນີ້ ເຮົາຈະຂົ່ມຈິດນັ້ນໂດຍອຸບາຍອັນແຍບຄາຍ
ຄືຄວານຊ້າງຜາບພະຍົດຊ້າງຕົກມັນ

[໑໑໓໔] ພຣະສາດສະດາຂອງເຮົາຊົງຢັ່ງຮູ້ໂລກນີ້
ໂດຍຄວາມເປັນສະພາວະບໍ່ທ່ຽງ ບໍ່ໝັ້ນຍືນ ບໍ່ມີແກ່ນສານ
ຈິດ ເຊີນທ່ານພາເຮົາບ່າຍໜ້າໄປໃນສາດສະໜາຂອງພຣະຊິນນະເຈົ້າ
ຊ່ອຍເຮົາໃຫ້ຂ້າມໂອຄະໃຫຍ່ທີ່ຂ້າມໄດ້ແສນຍາກ

[໑໑໓໕] ຈິດ ເຮືອນຄືອັດຕະພາບນີ້ບໍ່ເປັນຂອງທ່ານຄືແຕ່ກ່ອນ
ເຮົາບໍ່ເພິ່ງກັບໄປຢູ່ໃນອຳນາດທ່ານ
ຈະບວດໃນສາດສະໜາຂອງພຣະຜູ້ມີພຣະພາກເຈົ້າ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
ທຳມະດາສະມະນະທັງຫຼາຍບໍ່ປະສົບຄວາມເສຍຫາຍຄືເຮົາ

[໑໑໓໖] ພູ ມະຫາສະມຸດ ແມ່ນ້ຳຄົງຄາເປັນຕົ້ນ
ແຜ່ນດິນ ທິດໃຫຍ່ທັງ ໔ ທິດນ້ອຍທັງ ໔
ທິດເບື້ອງເທິງ ທິດເບື້ອງລ່າງ ແລະພົບທັງ ໓
ລ້ວນເປັນສະພາບບໍ່ທ່ຽງ ມີແຕ່ຖືກບຽດບຽນຢູ່ສະເໝີ
ຈິດ ທ່ານໄປບ່ອນໃດນໍຈຶ່ງຈະຍິນດີຄວາມສຸກ

[໑໑໓໗] ຈິດ ເຮົາໝັ້ນຄົງແລ້ວ ທ່ານຈະເຮັດຫຍັງໄດ້
ເຮົາບໍ່ຍອມຕົກຢູ່ພາຍໃຕ້ອຳນາດທ່ານ
ຄົນບໍ່ເພິ່ງແຕະຕ້ອງຖືງໝັງ ມີປາກສອງຂ້າງ
ໜ້າຕຳໜິຫຼາຍ ຮ່າງກາຍທີ່ເຕັມໄປດ້ວຍຂອງບໍ່ສະອາດຕ່າງ ໆ
ຫຼັ່ງຂອງບໍ່ສະອາດອອກຈາກປາກບາດທັງ ໙

[໑໑໓໘] ທ່ານເຂົ້າໄປສູ່ເຮືອນຄືຖ້ຳທີ່ເງີບພູແລະຈອມພູ
ທີ່ສວຍງາມຕາມທຳມະຊາດ ເຊິ່ງຝູງໝູປ່າແລະຝູງກວາງອາໄສຢູ່
ແລະປ່າທີ່ຝົນຕົກໃສ່ໃໝ່ ໆ ນັ້ນ ຈະຍິນດີພາວະນາ ຢູ່ບ່ອນນັ້ນ

[໑໑໓໙] ຝູງນົກຍູງມີຂົນຄໍຂຽວສວຍງາມ ມີຫອນງາມ
ມີປີກງາມ ທັງປົກຄຸມດ້ວຍຂົນປີກສວຍງາມ
ສົ່ງສຳນຽງສຽງຮ້ອງກ້ອງກັງວານມ່ວນຈັບໃຈນັ້ນ
ຈະຊ່ອຍທ່ານຜູ້ພໍ່າເພັງຊານຢູ່ໃນປ່າໃຫ້ອອນຊອນໄດ້

[໑໑໔໐] ເມື່ອຝົນຕົກ ຫຍ້າປົ່ງຍາວປະມານ ໔ ນີ້ວ
ເມື່ອປ່າໄມ້ແຕກດອກອອກຊໍ່ ງາມຄ້າຍກຸ່ມກ້ອນເຝືອ
ເຮົາເປັນຄືຕົ້ນໄມ້ຈະນອນເທິງຍອດຫຍ້າໃນລະຫວ່າງພູ
ເຄື່ອງປູລາດຫຍ້ານັ້ນອ່ອນນຸ່ມຈະເປັນຄືບ່ອນນອນສຳລີສຳລັບເຮົາ

[໑໑໔໑] ເຮົາຈະເຮັດທ່ານໄວ້ໃນອຳນາດໃຫ້ໄດ້ຄືຄົນຜູ້ເປັນໃຫຍ່
ຈະພໍໃຈດ້ວຍປັດໄຈຕາມທີ່ໄດ້ ຈະເຮັດທ່ານໄວ້ໃນອຳນາດໃຫ້ໄດ້
ຄືຄົນບໍ່ຂີ້ຄ້ານ ຄືເປົາໃສ່ແນວທີ່ມັດໄວ້ດີແລ້ວ
[໑໑໔໒] ເຮົາຈະເຮັດທ່ານໄວ້ໃນອຳນາດໃຫ້ໄດ້ຄືຄົນຜູ້ເປັນໃຫຍ່
ຈະພໍໃຈດ້ວຍປັດໄຈຕາມທີ່ໄດ້
ຈະໃຊ້ຄວາມພະຍາຍາມນຳທ່ານມາໄວ້ໃນອຳນາດໃຫ້ໄດ້
ຄືນາຍຄວານຊ້າງຜູ້ຊານສະຫຼາດ
ໃຊ້ຂໍສັບຊ້າງຕົກມັນໃຫ້ຢູ່ໃນອຳນາດຕົນ
[໑໑໔໓] ເຮົາພ້ອມກັບທ່ານຜູ້ເຝິກຝົນດີແລ້ວ ໝັ້ນຄົງ
ສາມາດດຳເນີນໄປເຖິງທາງທີ່ປອດໂປ່ງ
ເຊິ່ງທ່ານຜູ້ຕາມຮັກສາຈິດທັງຫຼາຍໄດ້ດຳເນີນໄປແລ້ວທຸກສະໄໝ
ຄືນາຍສາຣະຖີຜູ້ເຝິກມ້າສາມາດດຳເນີນໄປເຖິງພູມີພາກ
ທີ່ປອດໄພໄດ້ດ້ວຍມ້າອາຊາໄນທີ່ມີໃຈຊື່ກົງ

[໑໑໔໔] ເຮົາຈະມັດທ່ານໄວ້ທີ່ອາລົມກຳມະຖານດ້ວຍກຳລັງພາວະນາ
ຄືນາຍຄວານຊ້າງໃຊ້ເຊືອກທີ່ໜຽວມັດຊ້າງໄວ້ທີ່ເສົາຕະລຸງ
ຈິດທີ່ເຮົາຄຸ້ມຄອງດີ ອົບຮົມດີແລ້ວດ້ວຍສະຕິ
ຈະເປັນຈິດອັນຕັນຫາໃນພົບທັງປວງອາໄສບໍ່ໄດ້

[໑໑໔໕] ທ່ານຕັດເຫດເກີດຄືອາຍະຕະນະທີ່ແລ່ນໄປຜິດທາງດ້ວຍປັນຍາ
ຂົ່ມມັນສາດ້ວຍຄວາມພຽນ
ໃຫ້ຕັ້ງໝັ້ນຢູ່ໃນທາງຖືກ
ເຫັນແຈ້ງທັງຄວາມເກີດແລະຄວາມດັບ
ແລ້ວຈະເປັນທາຍາດຂອງພຣະສຳມາສຳພຸດທະເຈົ້າຜູ້ມີວາທະເປັນເລີດ

[໑໑໔໖] ຈິດ ທ່ານນຳພາເຮົາໃຫ້ເປັນໄປຕາມອຳນາດຂອງຄວາມເຂົ້າໃຈຜິດ ໔ ຢ່າງ
ຄືຄົນຈູງເດັກຊາວບ້ານແລ່ນອົນໄປສັບນັ້ນ
ທ່ານມັກຈະຄົບຫາພຣະສຳມາສຳພຸດທະເຈົ້າ
ຜູ້ພຽບພ້ອມດ້ວຍພຣະມະຫາກະລຸນາທິຄຸນ
ຜູ້ຕັດເຄື່ອງມັດຄືສັງໂຍດໄດ້
ເປັນພຣະມະຫາມຸນີ

[໑໑໔໗] ເນື້ອເຂົ້າໄປສູ່ພູອັນໜ້າອອນຊອນ
ປະກອບດ້ວຍນ້ຳແລະດອກໄມ້
ທ່ຽວໄປໃນປ່າອັນງົດງາມຢ່າງເສຣີ
ຈິດ ທ່ານກໍຈະອອນຊອນໃນພູທີ່ບໍ່ຊະຊາຍດ້ວຍຜູ້ຄົນຕາມລຳພັງໃຈ
ເມື່ອທ່ານບໍ່ຍິນດີຢູ່ທີ່ພູນັ້ນ
ທ່ານກໍຈະຕ້ອງເສື່ອມໂດຍບໍ່ຕ້ອງສົງໄສ
[໑໑໔໘] ຈິດຊາຍແລະຍິງເຫຼົ່າໃດປະພຶດຕາມຄວາມພໍໃຈ
ຕາມອຳນາດຂອງທ່ານ ຈະສະເຫວີຍຄວາມສຸກ
ຊາຍຍິງເຫຼົ່ານັ້ນໂງ່ຈ້າ ປະພຶດໄປຕາມອຳນາດມານ
ເພີດເພີນໃນພົບນ້ອຍພົບໃຫຍ່
ເປັນສາວົກຂອງທ່ານ
ປັນຍາສະນິບາດ ຈົບບໍລິບູນ
ລວມເລື້ອງພຣະເຖຣະທີ່ມີໃນນິບາດນີ້ ຄື
ພຣະຕາລະປຸຕະເຖຣະຜູ້ບໍລິສຸດຮູບດຽວ
ແລະໃນປັນຍາສະນິບາດນີ້ ມີ ໕໕ ພາສິດ ດັ່ງນີ້ແລ

# ໘໐. ສັດຖິນິບາດ

## ໑. ມະຫາໂມກຄັນລານະເຖຣະຄາຖາ

### ພາສິດຂອງພຣະມະຫາໂມກຄັນລານະເຖຣະ

(ພຣະມະຫາໂມກຄັນລານະເຖຣະ ໄດ້ກ່າວສອນພິກຂຸທັງຫຼາຍດ້ວຍພາສິດເຫຼົ່ານີ້ວ່າ)

[໑໑໔໗] ເຮົາທັງຫຼາຍຖືການຢູ່ປ່າເປັນຂໍ້ວັດປະຕິບັດ
ຖືການທ່ຽວບິນທະບາດເປັນຂໍ້ວັດປະຕິບັດ
ພໍໃຈອາຫານໃນບາດທີ່ໄດ້ມາດ້ວຍການທ່ຽວສະແຫວງຫາ
ເປັນຜູ້ມີຈິດໝັ້ນຄົງດ້ວຍດີພາຍໃນ
ຈຶ່ງທຳລາຍເສນາມັດຈຸຣາດໄດ້

[໑໑໕໐] ເຮົາທັງຫຼາຍຖືການຢູ່ປ່າເປັນຂໍ້ວັດປະຕິບັດ
ຖືການທ່ຽວບິນທະບາດເປັນຂໍ້ວັດປະຕິບັດ
ພໍໃຈອາຫານໃນບາດທີ່ໄດ້ມາດ້ວຍການທ່ຽວສະແຫວງຫາ
ຈະກຳຈັດເສນາມັດຈຸຣາດໄດ້
ຄືຊ້າງທຳລາຍເຮືອນໄມ້ອໍ້

[໑໑໕໑] ເຮົາທັງຫຼາຍຖືການຢູ່ເຫງົ້າໄມ້ເປັນຂໍ້ວັດປະຕິບັດ
ມີຄວາມພຽນຕໍ່ເນື່ອງ
ພໍໃຈໃນອາຫານທີ່ຢູ່ໃນບາດດ້ວຍການທ່ຽວສະແຫວງຫາໄດ້ມາ
ເປັນຜູ້ມີຈິດຕັ້ງໝັ້ນດ້ວຍດີພາຍໃນ
ເພິ່ງທຳລາຍເສນາມັດຈຸຣາດໄດ້

[໑໑໕໘] ເຮົາທັງຫຼາຍຖືການຢູ່ເຫງົ້າຕົ້ນໄມ້ເປັນຂໍ້ວັດປະຕິບັດ
ມີຄວາມພຽນຕໍ່ເນື່ອງ
ພໍໃຈໃນອາຫານທີ່ຢູ່ໃນບາດດ້ວຍການທ່ຽວສະແຫວງຫາໄດ້ມາ
ຈະກຳຈັດເສນາມັດຈຸຣາດໄດ້
ຄືຊ້າງທຳລາຍເຮືອນໄມ້ອໍ້

(ພຣະເຖຣະຫວັງຈະສອນແມ່ຍິງແພດສະຍາ ຈຶ່ງໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໑໑໕໓] ໜ້າຕຳໜິ ຕູບຄືເຮືອນຮ່າງສຳເລັດດ້ວຍໂຄງກະດູກ
ສາບທາດ້ວຍຊີ້ນ ຮ້ອຍຮັດໄປດ້ວຍເສັ້ນເອັນ
ເຕັມໄປດ້ວຍຂອງບໍ່ສະອາດ ມີກິ່ນເໝັນ
ທ່ານຍັງມົວຍຶດຖືເຮືອນຮ່າງທີ່ສັດອື່ນໝາຍປອງວ່າເປັນຂອງເຮົາ

[໑໑໕໔] ໃນຮ່າງກາຍເຊິ່ງຄືຖົງເຕັມດ້ວຍຄູດ
ມີໜັງຫຸ້ມຫໍ່ໄວ້ຂອງທ່ານຜູ້ປຽບຄືນາງຜີສາດ
ມີຝີທີ່ເອິກ ມີປ່ອງ ໙ ປ່ອງ ຫຼັ່ງຂອງບໍ່ສະອາດອອກຢູ່ປະຈຳ

[໑໑໕໕] ເຮືອນຮ່າງຂອງທ່ານທີ່ເນື່ອງມາແຕ່ການປະຕິບັດໂດຍຖືກຕ້ອງ
ມີປ່ອງ ໙ ປ່ອງ ສົ່ງກິ່ນເໝັນ
ທ່ານຜູ້ເຫັນໄພໃນສັງສາຣະວັດຍ່ອມເວັ້ນສາຫ່າງໄກ
ຄືຄົນຮັກຄວາມສະອາດເຫັນຄູດແລ້ວກໍຫຼີກສາຫ່າງໄກ

[໑໑໕໖] ຫາກຊົນເພິ່ງຮູ້ເຖິງເຮືອນຮ່າງຂອງທ່ານຄືທີ່ເຮົາຮູ້
ກໍຈະເພິ່ງເວັ້ນສາຫ່າງໄກ ຄືຄົນຮັກຄວາມສະອາດ
ເຫັນຂຸມຄູດໃນລະດູຝົນກໍຫຼີກສາຫ່າງໄກ

(ຍິງແພດສະຍາເກີດຄວາມສະຫຼົດໃຈ ຈຶ່ງໄດ້ກ່າວຕອບທ່ານດ້ວຍພາສິດນີ້ວ່າ)

[໑໑໕໗] ຂ້າແດ່ທ່ານສະມະນະຜູ້ມີຄວາມພຽນຫຼາຍ
ເລື້ອງນີ້ເປັນຈິງຄືທີ່ທ່ານເວົ້າ
ແຕ່ຜູ້ຄົນລາງພວກຍັງຈົມຢູ່ໃນຮ່າງກາຍນີ້
ຄືງົວແກ່ຈົມຢູ່ໃນກອງອຸດຈາຣະ

(ພຣະເຖຣະກ່າວຕອບຍິງແພດສະຍາດ້ວຍພາສິດເຫຼົ່ານີ້ວ່າ)

[໑໑໕໘] ຜູ້ໃດປະສົງຈະໃຊ້ຂີ້ມີ້ນ
ຫຼືແມ່ນເຄື່ອງຍ້ອມແນວອື່ນ ຍ້ອມອາກາດ
ການກະທຳຂອງຜູ້ນັ້ນເປັນເຫດໃຫ້ເກີດຄວາມລຳບາກໃຈທໍ່ນັ້ນ

[໑໑໕໙] ຈິດຂອງເຮົານີ້ສະເໝີດ້ວຍອາກາດ
ຕັ້ງໝັ້ນດີແລ້ວໃນອາລົມພາຍໃນ
ທ່ານຜູ້ມີຄວາມຄິດຊົ່ວຊາມ ທ່ານຢ່າມາຫວັງຄົນຄືເຮົາ
ຄືໂຕແມງເມົ່າມັກຫຼິ້ນກອງໄຟ

(ພຣະເຖຣະເມື່ອຈະກ່າວສອນພິກຂຸທັງຫຼາຍ ຈຶ່ງໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໑໑໖໐] ເຊີນທ່ານເບິ່ງອັດຕະພາບທີ່ຜ້າແລະອາພອນເປັນຕົ້ນເຮັດໃຫ້ວິຈິດ
ມີກາຍເປັນບາດ ມີກະດູກ ໓໐໐ ທ່ອນເປັນໂຄງຮ່າງ
ກະສັບກະສ່າຍ ທີ່ພວກຄົນຈົ່າດຳຣິຫວັງກັນສ່ວນຫຼາຍ
ເຊິ່ງບໍ່ມີຄວາມໝັ້ນຍືນຄົງທົນ

[໑໑໖໑] ເຊີນທ່ານເບິ່ງຮູບທີ່ສະຕີໃຊ້ແກ້ວມະນີແລະຕຸ້ມຫູເຮັດໃຫ້ວິຈິດ
ເຊິ່ງມີໜັງຫຸ້ມກະດູກໄວ້ພາຍໃນ ງາມພ້ອມກັບຜ້າ

[໑໑໖໒] ຕີນທັງສອງຍ້ອມດ້ວຍຄັ່ງສົດ ໜ້າທາດ້ວຍຈຸນ
ກໍສາມາດເຮັດຄົນຈົ່າໃຫ້ລຸ່ມຫຼົງ
ແຕ່ບໍ່ສາມາດເຮັດຄົນສະແຫວງຫາຝັ່ງຄືນິບພານໃຫ້ລຸ່ມຫຼົງໄດ້

[໑໑໖໓] ຜົມທີ່ຕົບແຕ່ງໃຫ້ເປັນລອນດັ່ງກະດານໝາກຣຸກ
ຕາທັງສອງທີ່ຢອດດ້ວຍຢາຢອດຕາກໍສາມາດເຮັດຄົນຈົ່າໃຫ້ລຸ່ມຫຼົງ
ແຕ່ບໍ່ສາມາດເຮັດຄົນທີ່ສະແຫວງຫາຝັ່ງຄືນິບພານໃຫ້ລຸ່ມຫຼົງໄດ້

[໑໑໖໔] ກາຍທີ່ມີສະພາບເປື່ອຍເນົ່າເປັນທຳມະດາເຊິ່ງຕົບແຕ່ງແລ້ວ
ຄືກັບຢາຢອດຕາໃໝ່ ໆ ທີ່ງົດງາມ
ກໍສາມາດເຮັດຄົນຈົ່າໃຫ້ລຸ່ມຫຼົງ
ແຕ່ບໍ່ສາມາດເຮັດຄົນທີ່ສະແຫວງຫາຝັ່ງຄືນິບພານໃຫ້ລຸ່ມຫຼົງໄດ້

[໑໑໖໕] ນາຍພານເນື້ອດັກບ້ວງໄວ້ ເນື້ອບໍ່ມາຕິດບ້ວງ
ເຮົາທັງຫຼາຍ(ໝູ່ເນື້ອ)ກິນເຫຍື່ອແລ້ວຫຼົບໜີໄປ
ເມື່ອນາຍພານກຳລັງຮ່ຳໄຮຢູ່

[໑໑໖໖] ເຮົາທັງຫຼາຍ(ໝູ່ເນື້ອ)ກັດບ້ວງຂອງນາຍພານເນື້ອຂາດແລ້ວ
ເນື້ອບໍ່ຕິດບ້ວງ ເຮົາກິນເຫຍື່ອແລ້ວຫຼົບໜີໄປ
ໃນເມື່ອນາຍພານເນື້ອກຳລັງເສົ້າໂສກຢູ່

(ພຣະເຖຣະຜາຣົບການປະຣິນິບພານຂອງພຣະສາຣີບຸດເຖຣະຈຶ່ງກ່າວພາສິດເຫຼົ່ານີ້ວ່າ)

[໑໑໖໗] ເວລານັ້ນກໍເກີດເຫດເປັນຕາຢ້ານ ຂົນຫົວລຸກ
ເມື່ອພຣະສາຣີບຸດຜູ້ພຽບພ້ອມດ້ວຍອາການທຸກຢ່າງນິບພານແລ້ວ

[໑໑໖໗] ສັງຂານທັງຫຼາຍບໍ່ທ່ຽງນໍ
ມີສະພາວະເກີດຂຶ້ນແລະເສື່ອມໄປເປັນທຳມະດາ ເກີດຂຶ້ນແລ້ວກໍດັບໄປ
ຄວາມສະງົບລະງັບໄປແຫ່ງສັງຂານເຫຼົ່ານັ້ນໄດ້ໂດຍເດັດຂາດ ເປັນຄວາມສຸກ

[໑໑໖໙] ທ່ານຜູ້ພ່ຳເພັງພຽນທັງຫຼາຍທີ່ພິຈາລະນາເຫັນປັນຈະຂັນ
ໂດຍເປັນສະພາວະປັ່ນປ່ວນ ແລະໂດຍບໍ່ແມ່ນໂຕຕົນ
ຍ່ອມຮູ້ແຈ້ງໄດ້ຢ່າງສຸຂຸມລຸ້ມເລິກ
ຄືນາຍຂະມັງທະນູໃຊ້ລູກສອນຍິງປາຍຂົນເນື້ອຊາຍ

[໑໑໗໐] ອັນໜຶ່ງ ທ່ານຜູ້ພ່ຳເພັງພຽນທັງຫຼາຍທີ່ພິຈາລະນາ
ເຫັນສັງຂານທັງຫຼາຍ ໂດຍເປັນສະພາວະປັ່ນປ່ວນ
ແລະໂດຍບໍ່ແມ່ນໂຕຕົນ ຮູ້ແຈ້ງໄດ້ຢ່າງລະອຽດ
ຄືນາຍຂະມັງທະນູໃຊ້ລູກສອນຍິງປາຍຂົນຊາຍ

[໑໑໗໑] ພິກຂຸຜູ້ມີສະຕິພະຍາຍາມລະການຣາຄະ
ຄືຄົນພະຍາຍາມໃຊ້ສັດຕາຕັດເຄື່ອງປະຫານທີ່ຊື່ໂອມັດຖະ
ແລະຄືຄົນຖືກໄຟໄໝ້ຫົວຟ້າວມອດໄຟນັ້ນສາ

[໑໑໗໒] ພິກຂຸຜູ້ມີສະຕິພະຍາຍາມລະພາວະຣາຄະ[១]
ຄືຄົນພະຍາຍາມໃຊ້ສັດຕາຕັດເຄື່ອງປະຫານທີ່ຊື່ວ່າໂອມັດຖະ
ແລະຄືຄົນຖືກໄຟໄໝ້ຫົວຟ້າວມອດໄຟນັ້ນ

[໑໑໗໓] ເຮົາອັນພຣະຜູ້ມີພຣະພາກເຈົ້າຜູ້ອົບຮົມພຣະອົງເອງ
ຊົງໄວ້ເຊິ່ງພຣະວໍຣະກາຍມີໃນພົບສຸດທ້າຍ ຊົງເຕືອນແລ້ວ
ໄດ້ເຮັດຜາສາດຂອງນາງວິສາຂາມິຄາຣະມານດາໃຫ້ໄຫວດ້ວຍປາຍນິ້ວຕີນ

[໑໑໗໔] ບຸກຄົນບໍ່ເພິ່ງບັນລຸນິບພານ
ອັນເປັນເຫດປົດເປື້ອງກິເລດເຄື່ອງຮ້ອຍຮັດທັງປວງໄດ້
ຍ້ອນຄວາມພຽນຫຍ່ອນຍານ
ທັງບັນລຸບໍ່ໄດ້ດ້ວຍກຳລັງຄວາມພຽນຈັກໜ້ອຍ

[໑໑໗໕] ພິກຂຸນີ້ຍັງໜຸ່ມແລະເປັນຄົນປະເສີດ
ຊະນະມານພ້ອມທັງເສນາມານ
ຍັງຊົງຮ່າງກາຍເຊິ່ງມີໃນພົບສຸດທ້າຍຢູ່

[໑໑໗໖] ພິກຂຸຜູ້ເປັນບຸດຂອງພຣະພຸດທະອົງເຊິ່ງຄົງທີ່
ຫາຜູ້ສະເໝີເໝືອນບໍ່ໄດ້ຢູ່ທີ່ຮ່ອມພູເຂົ້າຊານ
ຄືສາຍຟ້າແມບສ່ອງລອດເຂົ້າໄປ
ຕາມປ່ອງພູເວພາຣະ ແລະພູປັນທະວະ

[໑໑໗໗] ພິກຂຸຜູ້ສະງົບ ງົດເວັ້ນຈາກການເຮັດຊົ່ວ
ຢູ່ແຕ່ໃນເສນາສະນະບ່ອນສະງັດເປັນມຸນີ
ເປັນທາຍາດຂອງພຣະພຸດທະອົງຜູ້ປະເສີດ
ອັນທ້າວມະຫາພົມພ້ອມທັງເທວະດາຂາບໄຫວ້

(ພຣະເຖຣະ ເມື່ອຈະອະນຸເຄາະພາມມິດສາທິດຖິ ຫຼານຊາຍພຣະສາຣີບຸດເຖຣະ ຈຶ່ງໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໑໑໗໘] ພາມ ເຊີນທ່ານໄຫວ້ພຣະມະຫາກັດສະປະຜູ້ສະງົບລະງັບ
ງົດເວັ້ນຈາກການກະທຳຄວາມຊົ່ວ ຢູ່ແຕ່ໃນເສນາສະນະບ່ອນສະງັດ
ເປັນມຸນີ ເປັນທາຍາດຂອງພຣະພຸດທະອົງຜູ້ປະເສີດ

[໑໑໗໙] ອັນໜຶ່ງ ໃນໝູ່ມະນຸດ ຜູ້ໃດເປັນພາມ
ສືບເຊື້ອສາຍພາມຕິດຕໍ່ກັນມາທັງໝົດເຖິງ ໑໐໐ ຊາດ
ພຽບພ້ອມດ້ວຍຄວາມຮູ້

[໑໑໘໐] ເຖິງແມ່ນຈະເພິ່ງເປັນຜູ້ຮ່ຳຮຽນມົນ ຈົບໄຕຣເພດ
ການຮຽນສຳເລັດວິຊາເປັນຕົ້ນນັ້ນຂອງຜູ້ນັ້ນ
ຍ່ອມມີຄ່າບໍ່ເຖິງສ່ວນທີ ໑໖ ແຫ່ງບຸນທີ່ໄດ້ໄຫວ້ພຣະມະຫາກັດສະປະນີ້

[໑໑໘໑] ໃນເວລາເຊົ້າ ພິກຂຸເຊັ່ນໃດເຂົ້າວິໂມກຂະສະມາບັດ ໘ ທັງອະນຸໂລມແລະ
ປະຕິໂລມ ອອກຈາກສະມາບັດນັ້ນແລ້ວ ຈຶ່ງທ່ຽວໄປບິນທະບາດ

[໑໑໘໕] ພາມ ທ່ານຢ່າຮຸກຮານພິກຂຸເຊັ່ນນັ້ນ
ຢ່າໄດ້ທຳລາຍຕົນເລີຍ
ເຊີນເຮັດໃຈໃຫ້ເຫຼື້ອມໃສໃນພຣະອະຣະຫັນຜູ້ໝັ້ນຄົງ
ຟ້າວປະນົມມືໄຫວ້ສາ ຫົວຂອງທ່ານຢ່າໄດ້ແຕກ

(ພຣະເຖຣະເຫັນພຣະໂປດຖິລະປະຕິບັດ ຈຶ່ງໄດ້ກ່າວພາສິດເຫຼົ່ານີ້ວ່າ)

[๑๑໗໓]  ພຣະໂປດຖິລະນີ້ບໍ່ເຫັນພຣະສັດທໍາ
ຖືກສັງສາຣະວັດຫຸ້ມຫໍ່ໄວ້ ເດີນທາງຜິດ ເຊິ່ງເປັນທາງຄົດບໍ່ຄວນຍ່າງ

[๑๑໗๔]  ພຣະໂປດຖິລະໝົກມຸ້ນຢູ່ໃນສັງຂານ  ຕິດຢູ່ໃນລາບສັກກາຣະ
ດັ່ງໂຕໜອນທີ່ຕິດຄູດ ຈຶ່ງເປັນຄົນເປົ່າ

(ພຣະເຖຣະເມື່ອຈະສັນເສີນທ່ານພຣະສາຣີບຸດ ຈຶ່ງໄດ້ກ່າວພາສິດເຫຼົ່ານີ້ວ່າ)

[๑๑໗໕]  ເຊີນທ່ານເບິ່ງ ທ່ານພຣະສາຣີບຸດມີຄຸນໜ້າເບິ່ງ ໜ້າຊົມ
ລຸດພົ້ນໄດ້ດ້ວຍວິກຂໍາພະນະປະຫານແລະສະມຸດເສທະປະຫານທັງ ๔ ສ່ວນ
ມີຈິດຕັ້ງໝັ້ນດີພາຍໃນ

[๑๑໗໖]  ຜູ້ປາສະຈາກລູກສອນຄືຣາຄະເປັນຕົ້ນ
ສິ້ນສັງໂຍດ ບັນລຸວິດຊາ ໓
ລະມັດຈຸໄດ້ ຄວນແກ່ທັກຂິນາ
ເປັນເນື້ອນາບຸນອັນປະເສີດຂອງໝູ່ມະນຸດ

(ພຣະສາຣີບຸດເຖຣະເມື່ອຈະສັນເສີນພຣະມະຫາໂມກຄັນລານະເຖຣະ ຈຶ່ງໄດ້ກ່າວພາສິດເຫຼົ່ານີ້ວ່າ)

[๑๑໗໗]  ອຸບັດເທບມີລິດ ມີກຽດຕິຍົດ
ມີຈໍານວນຫຼາຍເຖິງ ๑໐,໐໐໐ ເຫຼົ່ານີ້
ແລະພົມປຸໂລຫິດທັງໝົດກໍພາກັນມາຢືນປະນົມມືນອບນ້ອມ
ພຣະໂມກຄັນລານະ ພ້ອມກັບກ່າວວ່າ

[๑๑໗໘]  ຂ້າແດ່ ທ່ານຜູ້ເປັນບຸຣຸດອາຊາໄນ ຂໍຄວາມນອບນ້ອມຈົ່ງມີແດ່ທ່ານ
ຂ້າແດ່ ທ່ານຜູ້ເປັນບຸຣຸດສູງສຸດ ຂໍຄວາມນອບນ້ອມຈົ່ງມີແດ່ທ່ານ
ທ່ານຜູ້ນິຣະທຸກ ທ່ານສິ້ນອາສະວະແລ້ວເປັນຜູ້ຄວນແກ່ທັກຂິນາ

[๑๑໗໙]  ພຣະໂມກຄັນລານະຜູ້ອັນມະນຸດແລະເທວະດາບູຊາແລ້ວ
ເກີດໂດຍອະຣິຍະຊາດ ຄອບງໍາຄວາມຕາຍໄດ້
ບໍ່ຕິດຢູ່ໃນສັງຂານ ຄືດອກບົວບໍ່ຕິດຢູ່ກັບນໍ້າ

[๑๑໘໐]  ພຣະໂມກຄັນລານະຮູ້ແຈ້ງໂລກໄດ້ເປັນພັນພຽງບຶດດຽວ
ຄືທ້າວມະຫາພົມເປັນຜູ້ຊ່ຽວຊານໃນຄຸນຕືລິດ

ໃນຈຸຕິແລະອຸບັດຂອງເຫຼົ່າສັດ
ຍ່ອມເຫັນເທວະດາທັງຫຼາຍໄດ້ດ້ວຍທິບພະຈັກຂຸໃນການອັນສົມຄວນ

(ພຣະມະຫາໂມກຄັນລານະ ເມື່ອຈະປະກາດຄຸນຂອງຕົນໄດ້ກ່າວພາສິດວ່າ)

[໑໑໙໑] ພຣະສາຣີບຸດທີ່ນັ້ນຍັງມກວ່າພິກຂຸຜູ້ຊົງຄຸນນະທຳຊັ້ນສູງ
ທັງທາງດ້ານປັນຍາ ສິນ ແລະອຸປະສະມະ

[໑໑໙໒] ເພິ່ງເນຣະມິດອັດຕະພາບຊົ່ວຂະນະດຽວໄດ້ຕັ້ງແສນໂກດ
ເຮົາເປັນຜູ້ສະຫຼາດໃນວິທີສະແດງລິດຕ່າງ ໆ ທັງເປັນຜູ້ຊ່ຽວຊານດ້ວຍລິດ

[໑໑໙໓] ພິກຂຸໂມກຄັນລານະໂຄດຜູ້ເຖິງຄວາມສຳເລັດ
ໂດຍຄວາມເປັນຜູ້ຊ່ຽວຊານໃນສະມາທິ ແລະ ວິດຊາເປັນປາດ
ມີອິນຊີໝັ້ນຄົງໃນພຣະສາດສະໜາຂອງພຣະພຸດທະເຈົ້າ
ຜູ້ອັນຕັນຫາອາໄສບໍ່ໄດ້ ໄດ້ຕັດເຄື່ອງຄຸມຂັງຄືກິເລດໄດ້ຢ່າງເດັດຂາດແລ້ວ
ຄືຊ້າງທຳລາຍປອກທີ່ເຮັດດ້ວຍເຄືອຫົວກຸດໃຫ້ຂາດອອກ

[໑໑໙໔] ເຮົາໄດ້ປົນນິບັດພຣະສາດສະດາ
ໄດ້ເຮັດຕາມຄຳສັ່ງສອນຂອງພຣະພຸດທະເຈົ້າແລ້ວ
ປົງພາຣະທີ່ໜັກໄດ້ ຖອນຕັນຫາທີ່ນຳໄປສູ່ພົບໄດ້ຂາດແລ້ວ

[໑໑໙໕] ເຮົາອອກຈາກເຮືອນບວດເປັນບັນພະຊິດເພື່ອປະໂຫຍດໃດ
ປະໂຫຍດນັ້ນເປັນທີ່ສິ້ນສຸດໄປແຫ່ງສັງໂຍດທັງປວງເຮົາກໍໄດ້ບັນລຸແລ້ວ

[໑໑໙໖] ນະຣົກທີ່ທຸດສິມານ[១] ໄດ້ທຳຮ້າຍພຣະວິທຸຣະອັກຄະຣະສາວົກ
ແລະພຣະກະກຸສັນທະສຳມາສຳພຸດທະເຈົ້າ
ແລ້ວໄດ້ໄປມົກໄໝ້ຢູ່ ເປັນແນວໃດ
[໑໑໙໗] ຄື ນະຣົກທີ່ມີຂໍເຫຼັກເປັນຮ້ອຍ
ທັງໃຫ້ເກີດທຸກຂະເວທະນາສະເພາະຕົນທົ່ວເຖິງໝົດ
ນະຣົກທີ່ທຸດສິມານໄດ້ທຳຮ້າຍພຣະວິທຸຣະອົງອັກຄະຣະສາວົກ
ແລະພຣະກະກຸສັນທະສຳມາສຳພຸດທະເຈົ້າ ແລ້ວໄດ້ໄປມົກໄໝ້ຢູ່ ເປັນແນວນີ້
[໑໑໙໘] ພິກຂຸໃດເປັນສາວົກຂອງພຣະພຸດທະເຈົ້າ
ຍ່ອມຮູ້ກຳແລະຜົນກຳນີ້ໄດ້ໂດຍປະຈັກແຈ້ງ
ກັນທະມານ ທ່ານທຳຮ້າຍພິກຂຸເຊັ່ນນັ້ນແລ້ວ ຈະຕ້ອງໄດ້ຮັບທຸກ

[໑໑໙໙] ວິມານທັງຫຼາຍທີ່ຢູ່ທ່າມກາງມະຫາສະມຸດ
ຄົງຢູ່ໄດ້ຕະຫຼອດກັປ ມີສີດັ່ງແກ້ວໄພທູນງົດງາມ
ມີແສງໄຟສະຫວ່າງຄືກອງໄຟທີ່ລຸກຮຸ່ງ
ທັງພຽບພ້ອມດ້ວຍຣັດສະໝີ ມີໝູ່ນາງອັບປະສອນຈຳນວນຫຼາຍ
ມີຜິວພັນຕ່າງກັນຟ້ອນລຳຢູ່

[໑໘໐໐] ພິກຂຸໃດເປັນສາວົກຂອງພຣະພຸດທະເຈົ້າ
ຍ່ອມຮູ້ວິມານນີ້ໄດ້ໂດຍປະຈັກແຈ້ງ
ກັນຫະມານ ທ່ານທຳຮ້າຍພິກຂຸເຊັ່ນນັ້ນແລ້ວຈະຕ້ອງໄດ້ຮັບທຸກ

[໑໘໐໑] ພິກຂຸໃດອັນພຣະສຳມາສຳພຸດທະເຈົ້າຊົງໃຊ້ໄປແລ້ວ
ພິກຂຸສົງຫຼວງຫຼາຍກໍເຫັນຢູ່
ໄດ້ເຮັດຜາສາດຂອງນາງວິສາຂາມິຄານມານດາໃຫ້ໄຫວດ້ວຍປາຍນິ້ວຕີນ

[໑໘໐໒] ພິກຂຸໃດເປັນສາວົກຂອງພຣະພຸດທະເຈົ້າ
ຍ່ອມຮູ້ວິມານນີ້ໄດ້ໂດຍປະຈັກແຈ້ງ
ກັນຫະມານ ທ່ານທຳຮ້າຍພິກຂຸເຊັ່ນນັ້ນແລ້ວ ຈະຕ້ອງໄດ້ຮັບທຸກ

[໑໘໐໓] ພິກຂຸໃດມີພະລັງລິດກ້າແຂງ
ໄດ້ເຮັດເວຊະຍັນຕະຜາສາດໃຫ້ໄຫວດ້ວຍປາຍນິ້ວຕີນ
ທັງເຮັດເທບທັງຫຼາຍໃຫ້ສະຫຼົດໃຈ

[໑໘໐໔] ພິກຂຸໃດເປັນສາວົກຂອງພຣະພຸດທະເຈົ້າ
ຍ່ອມຮູ້ວິມານນີ້ໄດ້ໂດຍປະຈັກແຈ້ງ
ກັນຫະມານ ທ່ານທຳຮ້າຍພິກຂຸເຊັ່ນນັ້ນແລ້ວ ຈະຕ້ອງໄດ້ຮັບທຸກ

[໑໘໐໕] ພິກຂຸນັ້ນໃດໄຕ່ຖາມທ້າວສັກກະເທວະຣາດທີ່ເວຊະຍັນຕະຜາສາດວ່າ
ມະຫາບໍພິດ ພຣະອົງຊົງຮູ້ວິມຸດຕິ
ເຊິ່ງເປັນທີ່ສິ້ນສຸດຕັນຫາແດ່ບໍ
ທ້າວສັກກະເທວະຣາດຖືກຖາມບັນຫາ
ໄດ້ຊົງພະຍາກອນຕາມແນວເທດສະໜາ
ທີ່ພຣະສາດສະດາຊົງສະແດງແລ້ວແກ່ພິກຂຸນັ້ນ

(ພຣະມະຫາໂມກຄັນລານະເຖຣະໄດ້ເວົ້າທັກທາຍທ້າວມະຫາພົມນັ້ນດ້ວຍພາສິດເຫຼົ່ານີ້ວ່າ)

[໑໘໐໖] ພິກຂຸໃດເປັນສາວົກຂອງພຣະພຸດທະເຈົ້າ
ຍ່ອມຮູ້ວິມຸດຕິເປັນທີ່ສິ້ນສຸດຕັນຫານີ້ໄດ້ໂດຍປະຈັກແຈ້ງ
ກັນທະມານ ທ່ານທຳຮ້າຍພິກຂຸເຊັ່ນນັ້ນແລ້ວ ຈະຕ້ອງໄດ້ຮັບທຸກ

[໑໘໐໗] ພິກຂຸໃດຢືນຢູ່ທີ່ສຸທຳມະສະພາສອບຖາມທ້າວມະຫາພົມວ່າ
ທ່ານຜູ້ຈະເລີນ ແມ່ນມື້ນີ້ ທ່ານຍັງມີຄວາມເຫັນຢູ່ຄືແຕ່ກ່ອນ
ຫຼືທ່ານຍັງເຫັນຢູ່ວ່າຣັດສະໝີຂອງພຣະຜູ້ມີພຣະພາກເຈົ້າ
ພ້ອມທັງສາວົກພວຍພຸ່ງຮຸ່ງເຮືອງຍິ່ງ

[໑໘໐໘] ເມື່ອທ້າວມະຫາພົມຖືກຖາມບັນຫາແລ້ວ
ໄດ້ພະຍາກອນຕາມແນວເທດສະໜາ
ທີ່ພຣະສາດສະດາຊົງສະແດງແລ້ວແກ່ພິກຂຸນັ້ນວ່າ
ຂ້າແດ່ພຣະຜູ້ເປັນເຈົ້າຜູນິຣະທຸກ
ຂ້ານ້ອຍບໍ່ໄດ້ມີຄວາມເຫັນຄືແຕ່ກ່ອນແລ້ວ

[໑໘໐໙] ຂ້ານ້ອຍເຫັນວ່າ ຣັດສະໝີຂອງພຣະຜູ້ມີພຣະພາກເຈົ້າ
ພ້ອມທັງສາວົກເປັນໄປລ່ວງເລີຍຣັດສະໝີໃນພົມມະໂລກ
ມື້ນີ້ ຂ້ານ້ອຍນັ້ນລະຖິ້ມຄຳເວົ້າຂອງພຣະເຈົ້າ
ຜູ້ເຫັນວ່າ ເຮົາເປັນຜູ້ທ່ຽງ ມີຄວາມໝັ້ນຍືນໄດ້

(ພຣະມະຫາໂມກຄັນລານະເຖຣະໄດ້ເວົ້າທັກທາຍທ້າວມະຫາພົມນັ້ນດ້ວຍພາສິດເຫຼົ່ານີ້ ວ່າ)

[໑໘໑໐] ພິກຂຸໃດເປັນສາວົກຂອງພຣະພຸດທະເຈົ້າ
ຍ່ອມຮູ້ທິດຖິນີ້ໄດ້ໂດຍປະຈັກແຈ້ງ
ກັນທະມານ ທ່ານທຳຮ້າຍພິກຂຸເຊັ່ນນັ້ນແລ້ວ ຈະຕ້ອງໄດ້ຮັບທຸກ

[໑໘໑໑] ພິກຂຸໃດສະແດງຍອກກາໄດຊຸນເຂົາສິເນຣຸ
ໃຫ້ຊົນຊາວຊົມພູທະວີບ ປຸບພະວິເທຫະທະວີບ
ອະມໍຣະໂຄຍານທະວີບ ແລະຊາວອຸດຕະຣະກຸຣຸທະວີບ
ເຫັນກັນໄດ້ດ້ວຍວິໂມກ

[໑໘໑໒] ພິກຂຸໃດເປັນສາວົກຂອງພຣະພຸດທະເຈົ້າ
ຍ່ອມຮູ້ວິໂມກຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວນີ້ໄດ້ໂດຍປະຈັກແຈ້ງ
ກັນທະມານ ທ່ານທຳຮ້າຍພິກຂຸເຊັ່ນນັ້ນແລ້ວ ຈະຕ້ອງໄດ້ຮັບທຸກ

[໑໔໑໓] ໄຟບໍ່ໄດ້ຕັ້ງໃຈເລີຍວ່າ ເຮົາຈະໄໝ້ຄົນພານ
ແຕ່ຄົນພານໂຕນເຂົ້າໄປຫາໄຟທີ່ລຸກຮຸ່ງ ໃຫ້ໄໝ້ໂຕເອງ ສັນໃດ

[໑໔໑໔] ມານ ທ່ານກໍຄືກັນສັນນັ້ນ
ທຳຮ້າຍພຣະຕະຖາຄົດເຈົ້າແລະອະຣິຍະສາວົກນັ້ນແລ້ວ
ກໍຈະເຜົາຕົນເອງ ຄືຄົນພານຖືກໄຟໄໝ້

[໑໔໑໕] ມານທຳຮ້າຍພຣະຕະຖາຄົດເຈົ້າແລະອະຣິຍະສາວົກນັ້ນ
ຈຶ່ງໄດ້ປະສົບສິ່ງບໍ່ແມ່ນບຸນ
ມານຜູ້ຊົ່ວຊ້າ ຫຼືທ່ານເຂົ້າໃຈວ່າ ບາບບໍ່ໃຫ້ຜົນແກ່ເຮົາ

[໑໔໑໖] ມານຜູ້ມຸ້ງແຕ່ຄວາມຕາຍ
ເມື່ອທ່ານເຮັດແຕ່ບາບທ່ານກໍຍ່ອມຕາຍດ້ວຍຄວາມທຸກສິ້ນການລະນານ
ທ່ານຢ່າໄດ້ລັງກຽດສາວົກຂອງພຣະພຸດທະເຈົ້າແລ້ວ
ມຸ້ງທຳຮ້າຍພິກຂຸທັງຫຼາຍເລີຍ

[໑໔໑໗] ພຣະມະຫາໂມກຄັນລານະເຖຣະໄດ້ຄຸກຄາມມານ
ທີ່ປ່າເພສະກະລາວັນດັ່ງນີ້ແລ້ວ
ຍ້ອນເຫດນັ້ນ ມານນັ້ນເສຍໃຈ ຈຶ່ງໄດ້ຫາຍໄປ ໃນບ່ອນນັ້ນນັ້ນເອງ
ຮູ້ວ່າ ທ່ານພຣະມະຫາໂມກຄັນລານະເຖຣະໄດ້ກ່າວພາສິດທັງຫຼາຍ
ດ້ວຍປະການດັ່ງນີ້ແລ

**ສັດຖິນິບາດ ຈົບ**

## ລວມເລື້ອງພຣະເຖຣະທີ່ມີໃນນິບາດນີ້ ຄື

ພຣະມະຫາໂມກຄັນລານະເຖຣະຜູ້ມີລິດຫຼາຍອິງດຽວທ່ານັ້ນ

ແລະໃນສັດຖິນິບາດນີ້ມີ ໖໘ ພາສິດ ດັ່ງນີ້ແລ

# ໔໑. ມະຫານິບາດ

## ໑. ວັງຄີສະເຖຣະຄາຖາ

### ພາສິດຂອງພຣະວັງຄີສະເຖຣະ

(ພຣະວັງຄີສະເຖຣະບວດແລ້ວໃໝ່ ໆ ໄດ້ເຫັນແມ່ຍິງຫຼາຍຄົນ ລ້ວນແຕ່ງໂຕງົດງາມ ພາກັນໄປວິຫານ ກໍເກີດຄວາມກຳໜັດຍິນດີ ເມື່ອຈະບັນເທົາຄວາມກຳໜັດຍິນດີນັ້ນ ໄດ້ກ່າວ ພາສິດເຫຼົ່ານີ້ວ່າ)

[໑໔໑໗] ຄວາມນຶກກັບຄວາມຄະນອງອັນຊົ່ວຊາມເຫຼົ່ານີ້
ຍ່ອມເຂົ້າຄອບງຳເຮົາຜູ້ອອກບວດເປັນບັນພະຊິດ

[໑໔໑໙] ບຸດຂອງຄົນສູງສັກໄດ້ສຶກສາວິຊາຍິງທະນູເວລາລະຫຼາຍ ໆ
ມາຢ່າງຊ່ຽວຊານ ຍິງລູກທະນູໄປຮອບ ໆ ໂຕໂດຍບໍ່ຜິດພາດ

[໑໔໔໐] ເຖິງແມ່ນແມ່ຍິງຈະມາຫຼາຍໆກວ່າແມ່ຍິງເຫຼົ່ານີ້
ກໍຈະບຽດບຽນເຮົາບໍ່ໄດ້ແນ່ນອນ
ຍ້ອນເຮົາໄດ້ເປັນຜູ້ຕັ້ງໝັ້ນຢູ່ໃນທຳສາແລ້ວ

[໑໔໔໑] ດ້ວຍວ່າ ເຮົາໄດ້ສະດັບທາງເປັນທີ່ໃຫ້ເຖິງນິບພານນີ້
ເບື້ອງພຣະພັກຂອງພຣະພຸດທະເຈົ້າ ຜູ້ເປັນເຜົ່າພັນດວງອາທິດ
ໃຈຂອງເຮົາຍິນດີແລ້ວໃນທາງນັ້ນແນ່ນອນ

[໑໔໔໔] ມານຜູ້ຊົ່ວຊ້າ ຖ້າທ່ານຍັງເຂົ້າມາຫາເຮົາຜູ້ຢູ່ດ້ວຍອາການແນວນີ້
ເຮົາກໍຈະເຮັດທາງທີ່ເຮົາເຮັດໄວ້ໃຫ້ເຖິງບ່ອນສຸດ
ໂດຍທ່ານຈະບໍ່ພົບເຫັນໄດ້ ສັນນັ້ນ

[໑໔໔໓] ຜູ້ໃດລະຄວາມຍິນດີ ຍິນຮ້າຍ
ແລະຄວາມນຶກກ່ຽວກັບບ້ານເຮືອນໄດ້ທັງໝົດ
ໝົດຕັນຫາ ບໍ່ມີກິເລດ ບໍ່ເພິ່ງກໍ່ຕັນຫາຄືປ່າໃນບ່ອນໃດ ໆ
ຜູ້ນັ້ນຊື່ວ່າເປັນພິກຂຸ

[໑໔໔໔] ຮູບແນວໃດແນວໜຶ່ງໃນໂລກນີ້
ທັງທີ່ອາໄສແຜ່ນດິນ ຢູ່ໃນອາກາດ ອັນນັບເນື່ອງໃນພົບ ໓

ລ້ອນບໍ່ຫ່ຽງຊຸດໂຊມໄປທັງນັ້ນ
ທ່ານຜູ້ຮູ້ທັງຫຼາຍຮູ້ແຈ້ງແນວນີ້ແລ້ວ ມີຕີນລຸດພົ້ນຫ່ຽວໄປ

[໑໘໘໕] ເຫຼົ່າປຸຖຸຊົນທີ່ມີຈິດໝົກມຸ້ນໃນອຸປະທິທັງຫຼາຍ
ຄື ຮູບ ສຽງ ກິ່ນ ຣົດ ແລະໂຜດຖັບພະ
ທ່ານຈຶ່ງເປັນຜູ້ບໍ່ຫວັ່ນໄຫວກຳຈັດຄວາມພໍໃຈໃນປັນຈະກາມະຄຸນນີ້ສາ
ຍ້ອນຜູ້ໃດບໍ່ຕິດໃນປັນຈະກາມະຄຸນນີ້
ບັນດິດທັງຫຼາຍຮຽກຜູ້ນັ້ນວ່າເປັນມຸນີ

[໑໘໘໖] ຖ້າມິດສາວິຕົກທີ່ອີງອາໄສທິດຖິ ໖໐ ປະການ
ເຊິ່ງເປັນທຳທີ່ບໍ່ຕັ້ງໝັ້ນໃນການໃດ ໆ
ຜູ້ໃດບໍ່ເພິ່ງເປັນໄປໃນອຳນາດກິເລດດ້ວຍອຳນາດມິດສາວິຕົກເຫຼົ່ານັ້ນ
ທັງບໍ່ມັກກ່າວຄຳຫຍາບຄາຍ ຜູ້ນັ້ນຊື່ວ່າເປັນພິກຂຸ

[໑໘໘໗] ພິກຂຸຜູ້ເປັນບັນດິດ ມີຈິດໝັ້ນຄົງມາດົນ ບໍ່ລວງໂລກ
ມີປັນຍາຮັກສາຕົນໄດ້ ໝົດການທະເຍີທະຍານ
ເປັນມຸນີ ໄດ້ບັນລຸສັນຕະບົດ ຍ່ອມຫວັງລໍຖ້າສະເພາະເວລາທີ່ຈະປະຣິນິບພານ

[໑໘໘໘] ທ່ານຜູ້ເປັນສາວົກຂອງພຣະໂຄດົມ
ທ່ານຈຶ່ງລະຄວາມຈອງຫອງສາ
ແລະຈຶ່ງລະທາງແຫ່ງຄວາມຈອງຫອງໃຫ້ໝົດ
ຍ້ອນຜູ້ທີ່ໝົກມຸ້ນຢູ່ໃນທາງແຫ່ງຄວາມຈອງຫອງ
ຈະຕ້ອງເດືອດຮ້ອນເປັນເວລາດົນ

[໑໘໘໙] ໝູ່ສັດທີ່ຍັງລົບຫຼູ່ຄຸນທ່ານ
ຖືກຄວາມຈອງຫອງກຳຈັດແລ້ວ ຍ່ອມຕົກນະຣົກ
ເຫຼົ່າປຸຖຸຊົນທີ່ຖືກຄວາມຈອງຫອງກຳຈັດແລ້ວ
ເກີດໃນນະຣົກ ຍ່ອມເສົ້າໂສກຕະຫຼອດການລະນານ

[໑໘໙໐] ບາງເທື່ອ ພິກຂຸປະຕິບັດຖືກຕ້ອງແລ້ວ
ຊະນະກິເລດໄດ້ດ້ວຍມັກ ບໍ່ເສົ້າໂສກເລີຍ
ຍັງກັບໄດ້ກຽດຕິຄຸນແລະຄວາມສຸກອີກ
ບັນດິດທັງຫຼາຍຮຽກພິກຂຸຜູ້ປະຕິບັດຖືກເຊັ່ນນັ້ນວ່າ ເປັນຜູ້ເຫັນທຳ

[໑໘໓໑] ຍ້ອນເຫດນັ້ນ ພິກຂຸໃນພຣະສາດສະໜານີ້
ບໍ່ຄວນມີກິເລດເຄື່ອງຕຶງໃຈ ໕ ຢ່າງ
ຄວນມີແຕ່ຄວາມພຽນຊອບ ລະນິວອນໄດ້ແລ້ວ ເປັນຜູ້ບໍລິສຸດ
ທັງລະຄວາມຈອງຫອງໄດ້ໝົດ
ສະງົບລະງັບໄດ້ແລ້ວເຮັດບ່ອນສຸດທຸກໄດ້ດ້ວຍວິດຊາ ໓

(ພຣະວັງຄີສະເຖຣະເມື່ອຈະແຈ້ງຄວາມເປັນໄປຂອງຕົນແກ່ພຣະອານົນເຖຣະ ຈຶ່ງໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໑໘໓໒] ຂ້ານ້ອຍຖືກການຣາຄະແຜດເຜົາ
ຈິດຂອງຂ້ານ້ອຍຮ້ອນຮົນ
ທ່ານຜູ້ເປັນເຊື້ອສາຍໂຄຕະມະໂຄດ ດັ່ງຂ້ານ້ອຍຈະຂໍໂອກາດ
ຂໍທ່ານໂຜດອະນຸເຄາະຊ່ອຍບອກເຫດທີ່ດັບຣາຄະໃຫ້ແດ່

(ພຣະອານົນເຖຣະໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໑໘໓໓] ຈິດຂອງທ່ານຮ້ອນຮົນກໍຍ້ອນຄວາມສຳຄັນຜິດ
ທ່ານຈົ່ງລະຖິ້ມນິມິດວ່າງາມເຊິ່ງປະກອບດ້ວຍຣາຄະສາ

[໑໘໓໔] ຈົ່ງອົບຮົມຈິດໃຫ້ມີອາລົມດຽວ ໃຫ້ຕັ້ງໝັ້ນດີ
ດ້ວຍການພິຈາລະນາເຫັນວ່າບໍ່ງາມ
ຈົ່ງອົບຮົມກາຍະຄະຕາສະຕິ
ແລະຈົ່ງເປັນຜູ້ເບື່ອໜ່າຍໃຫ້ຫຼາຍ

[໑໘໓໕] ຈົ່ງຈະເລີນການພິຈາລະນາເຫັນວ່າ ບໍ່ທ່ຽງ
ແລະຈົ່ງລະມານານຸໄສສາໃຫ້ໄດ້ຂາດ
ແຕ່ນັ້ນ ທ່ານຈະເປັນຜູ້ສະງົບທ່ຽວໄປ ຍ້ອນລະມານະໄດ້

(ພຣະວັງຄີສະເຖຣະ ເກີດຄວາມໂສມະນັດ ເມື່ອຈະຊົມເຊີຍພຣະຜູ້ມີພຣະພາກເຈົ້າເບື້ອງພຣະພັກ ຈຶ່ງໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໑໘໓໖] ບຸກຄົນເພິ່ງກ່າວແຕ່ວາຈາທີ່ບໍ່ເປັນເຫດເຮັດຕົນໃຫ້ເດືອດຮ້ອນ
ແລະບໍ່ເປັນເຫດບຽດບຽນຊົນເຫຼົ່າອື່ນ
ວາຈານັ້ນແລເປັນສຸພາສິດ

[໑໘໓໗] ເພິ່ງກ່າວແຕ່ວາຈາທີ່ໜ້າຮັກ ເຊິ່ງເຫຼົ່າຊົນພາກັນຊົມຊື່ນ
ບໍ່ເພິ່ງເວົ້າຫຍາບຄາຍຕໍ່ຊົນເຫຼົ່າອື່ນ
ເພິ່ງເວົ້າແຕ່ຄຳທີ່ໜ້າຮັກ

[໑໘໓໘] ຄຳສັດແລເປັນວາຈາບໍ່ຕາຍ
ທຳນີ້ເປັນຂອງເກົ່າ
ສັດຕະບຸຣຸດທັງຫຼາຍຕັ້ງໝັ້ນຢູ່ແລ້ວໃນຄຳສັດ
ທັງທີ່ເປັນອັດຖະແລະເປັນທຳ

[໑໘໓໙] ພຣະພຸດທະເຈົ້າຕັດພຣະວາຈາໃດອັນກະເສມ
ເພື່ອບັນລຸນິບພານ ເພື່ອເຮັດບ່ອນສຸດທຸກ
ພຣະວາຈານັ້ນແລສູງສຸດກວ່າວາຈາທັງຫຼາຍ

(ພຣະວັງຄີສະເຖຣະເມື່ອຈະສັນເສີນທ່ານພຣະສາຣີບຸດເຖຣະ ຈຶ່ງໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໑໘໔໐] ພຣະສາຣີບຸດມີປັນຍາສຸຂຸມ ເປັນນັກປາດ
ຮູ້ທາງແລະບໍ່ແມ່ນທາງ ມີປັນຍາຫຼາຍ
ສະແດງທຳແກ່ພິກຂຸທັງຫຼາຍ

[໑໘໔໑] ສະແດງໂດຍຫຍໍ້ກໍໄດ້ ໂດຍພິດສະດານກໍໄດ້
ເມື່ອທ່ານກຳລັງສະແດງທຳ
ສຽງທີ່ເປ່ງອອກກໍມ່ວນຄືສຽງນົກສາລິກາ
ທັງປະຕິພານກໍຜາກົດ

[໑໘໔໒] ເມື່ອທ່ານສະແດງທຳນັ້ນຢູ່
ພິກຂຸທັງຫຼາຍທີ່ຟັງຄຳມ່ວນ
ກໍມີຈິດແຈ່ມໃສເບີກບານດ້ວຍສຽງທີ່ໜ້າຍິນດີ ໜ້າຟັງ ມ່ວນຈັບໃຈ
ຈຶ່ງຕັ້ງໃຈຟັງ

(ພຣະວັງຄີສະເຖຣະເມື່ອຈະຊົມເຊີຍພຣະສາດສະດາ ໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໑໘໔໓] ໃນມື້ ໑໕ ຄ່ຳ ເຊິ່ງເປັນມື້ວິສຸດທິປະວາຣະນາ
ມື້ນີ້ ມີພິກຂຸ ໕໐໐ ອົງມາປະຊຸມກັນ
ລ້ວນເປັນຜູ້ຕັດກິເລດເຄື່ອງມັດຄືສັງໂຍດໄດ້ຂາດ
ບໍ່ມີທຸກສິ້ນພົບສິ້ນຊາດແລ້ວ

ເປັນຜູ້ສະແຫວງຫາຄຸນນະທຳອັນປະເສີດ

[໑໘໔໔] ພຣະເຈົ້າຈັກກະພັດມີໝູ່ອຳມາດຫ້ອມລ້ອມ
ສະເດັດລຽບແຜ່ນດິນອັນໄພສານ
ມີມະຫາສະມຸດສາຄອນເປັນຂອບເຂດນີ້ ສັນໃດ

[໑໘໔໕] ສາວົກທັງຫຼາຍຜູ້ໄດ້ວິດຊາ ໓ ລະມັດຈຸຣາດໄດ້
ພາກັນຫ້ອມລ້ອມພຣະຜູ້ມີພຣະພາກເຈົ້າຜູ້ຊົງຊະນະສົງຄາມ
ຊົງນຳໝູ່ ເປັນຜູ້ປະເສີດ ກໍສັນນັ້ນ

[໑໘໔໖] ພຣະສາວົກທັງມວນລ້ວນແຕ່ເປັນພຸດທະຊິໂນຣົດ
ແລະໃນສາວົກເຫຼົ່ານີ້ບໍ່ມີຄວາມວ່າງເປົ່າຈາກຄຸນນະທຳເລີຍ
ຂ້າພຣະອົງເພິ່ງຖວາຍບັງຄົມພຣະອົງຜູ້ເປັນເຜົ່າພັນແຫ່ງດວງອາທິດ
ເຊິ່ງຊົງທຳລາຍລູກສອນຄືຕັນຫາໄດ້ແລ້ວ

[໑໘໔໗] ພິກຂຸກວ່າພັນອົງເຂົ້າໄປເຝົ້າພຣະສຸຄົດເຈົ້າເຊິ່ງກຳລັງຊົງສະແດງທຳ
ທີ່ປາສະຈາກກິເລດຄືທຸລິຄືນິບພານ ເຊິ່ງຫາໄພແຕ່ບ່ອນໃດບໍ່ໄດ້

[໑໘໔໘] ພິກຂຸເຫຼົ່ານັ້ນກໍພາກັນຟັງທຳອັນເຕັມປ່ຽມ
ທີ່ພຣະສຳມາສຳພຸດທະເຈົ້າຊົງສະແດງແລ້ວ
ພຣະສຳມາສຳພຸດທະເຈົ້າຜູ້ມີໝູ່ພິກຂຸຫ້ອມລ້ອມຍ່ອມຊົງງົດງາມນໍ

[໑໘໔໙] ພຣະຜູ້ມີພຣະພາກເຈົ້າຊົງພຣະນາມວ່ານາຄະ
ຊົງເປັນພຣະລືສີຜູ້ສູງສຸດກວ່າບັນດາລືສີທັງຫຼາຍ
ຊົງໂຮຍຝົນອະມະຕະທຳໃຫ້ຕົກກົດເຫຼົ່າພຣະສາວົກ
ຄ້າຍຝົນຫ່າໃຫຍ່

[໑໘໕໐] ຂ້າແດ່ພຣະມະຫາວີຣະເຈົ້າ
ພຣະວັງຄີສະສາວົກຂອງພຣະອົງປະສົງຈະເຝົ້າພຣະສາດສະດາ
ຈຶ່ງອອກຈາກບ່ອນພັກກາງເວັນ ມາຖວາຍບັງຄົມພຣະບາດທັງສອງຂອງພຣະອົງ

(ພຣະຜູ້ມີພຣະພາກເຈົ້າຕັດພຣະພຸດທະພາສິດເຫຼົ່ານີ້ວ່າ)

[໑໘໕໑] ພຣະວັງຄີສະຄອບງຳທາງເປັນທີ່ເກີດຂຶ້ນແຫ່ງກິເລດມານ
ທຳລາຍກິເລດເຄື່ອງຕຶງໃຈ ໕ ຢ່າງ ມີຣາຄະເປັນຕົ້ນຢູ່

ທ່ານທັງຫຼາຍຈົ່ງເບິ່ງວັງຄີສະ ຜູ້ທຳການປົດເປື້ອງກິເລດເປັນເຄື່ອງມັດ
ຜູ້ອັນຕັນຫາ ມານະ ແລະທິດຖິອີງອາໄສບໍ່ໄດ້
ຜູ້ຈຳແນກທຳເປັນສ່ວນ ໆ ໄດ້ນັ້ນ

[໑໘໕໘] ຄວາມຈິງ ພຣະວັງຄີສະໄດ້ບອກທາງໄວ້ຫຼາຍແນວ
ເພື່ອຖອນໂອຄະກິເລດ
ແລະເມື່ອພຣະວັງຄີສະນັ້ນບອກທາງອະມະຕະນັ້ນໄວ້ແລ້ວ
ພິກຂຸທັງຫຼາຍທີ່ເຫັນທຳກໍຕັ້ງໝັ້ນບໍ່ຫວັ່ນໄຫວ

[໑໘໕໙] ພຣະວັງຄີສະນັ້ນຜູ້ເຮັດແສງສະຫວ່າງໃຫ້ເກີດ ຮູ້ແຈ່ມແຈ້ງ
ໄດ້ເຫັນນິບພານເປັນເຫດລ່ວງພົ້ນວິນຍານຖິຕິໄດ້ທັງໝົດ
ເມື່ອຮູ້ແລະເຮັດໃຫ້ແຈ້ງ
ຈຶ່ງໄດ້ສະແດງທຳອັນເລີດແກ່ພິກຂຸຜູ້ເດີນທາງໄກ ໑໐ ອົງ

[໑໘໕໔] ເມື່ອທ່ານສະແດງທຳໄວ້ດີແນວນີ້
ທ່ານຜູ້ຮູ້ແຈ້ງທຳທັງຫຼາຍຈະມີຄວາມຜະໝາດໄດ້ແນວໃດ
ຍ້ອນເຫດນັ້ນແລ ພິກຂຸຜູ້ບໍ່ຜະໝາດ
ໃນຄຳສອນຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ
ເພິ່ງຕັ້ງໃຈສຶກສາ (ສິກຂາ ໓) ທຸກເມື່ອ

(ພຣະວັງຄີສະເຖຣະຫວັງຈະຊົມເຊີຍພຣະອັນຍາໂກນທັນຍະເຖຣະ ຈຶ່ງໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໑໘໕໕] ພຣະອັນຍາໂກນທັນຍະເຖຣະຜູ້ຕັດສະຮູ້ຕາມພຣະພຸດທະເຈົ້າ
ໄດ້ມີຄວາມບາກບັ່ນຢ່າງແຮງກ້າ
ໄດ້ວິເວກເຊິ່ງເປັນທຳເຄື່ອງຢູ່ເປັນສຸກສະເໝີ ໆ

[໑໘໕໖] ເປັນຜູ້ບໍ່ຜະໝາດ ສຶກສາຢູ່
ໄດ້ບັນລຸສິ່ງທີ່ພຣະສາວົກຜູ້ເຮັດຕາມຄຳສອນຂອງພຣະສາດສະດາ
ຈະເພິ່ງບັນລຸໄດ້ທຸກອົງ

[໑໘໕໗] ພຣະອັນຍາໂກນທັນຍະເຖຣະມີອານຸພາບຫຼາຍ
ໄດ້ບັນລຸວິດຊາ ໓ ສະຫຼາດໃນການກຳນົດຮູ້ຈິດຂອງຜູ້ອື່ນ
ເປັນພຸດທະທາຍາດມາຖວາຍອະພິວາດພຣະບາດທັງສອງຂອງພຣະສາດສະດາຢູ່

(ພຣະວັງຄີສະເຖຣະຫວັງຈະຊົມເຊີຍ ພຣະຜູ້ມີພຣະພາກເຈົ້າ ແລະພຣະອະຣະຫັນຕະສາວິກາ ຈຶ່ງໄດ້ກ່າວ ພາສິດເຫຼົ່ານີ້ວ່າ)

[໑໘໕໗] ພຣະສາວົກທັງຫຼາຍຜູ້ໄດ້ບັນລຸວິດຊາ ໓ ລະມັດຈຸຣາດໄດ້
ພາກັນຫ້ອມລ້ອມພຣະມະຫາມຸນີຜູ້ເຖິງຝັ່ງແຫ່ງທຸກ ປະທັບນັ່ງທີ່ຂ້າງພູ

[໑໘໕໙] ພຣະມະຫາໂມກຄັນລານະຜູ້ມີລິດຫຼາຍ
ພິຈາລະນາກຳນົດຮູ້ຈິດທີ່ລຸດພົ້ນ
ບໍ່ມີອຸປະທິຂອງພຣະຂີນາສົບເຫຼົ່ານັ້ນໄດ້ດ້ວຍຈິດ

[໑໘໖໐] ພຣະສາວົກເຫຼົ່ານັ້ນພາກັນຫ້ອມລ້ອມພຣະມະຫາມຸນີໂຄດົມ
ຜູ້ຊົງສົມບູນດ້ວຍສົມບັດທຸກປະການ
ຊົງເຖິງຝັ່ງແຫ່ງທຸກ ພຽບພ້ອມດ້ວຍພຣະຄຸນຫຼາຍຢ່າງ

(ພຣະວັງຄີສະເຖຣະ ຫວັງຈະຊົມເຊີຍພຣະຜູ້ມີພຣະພາກເຈົ້າ ຈຶ່ງໄດ້ກ່າວພາສິດນີ້ວ່າ)

[໑໘໖໑] ຂ້າແດ່ພຣະມະຫາມຸນີອັງຄີຣະສະ
ພຣະອົງໄພໂຣດລ່ວງໂລກທັງໝົດດ້ວຍພຣະຍົດ
ຄືດວງຈັນແລະດວງອາທິດທີ່ປາສະຈາກມົນທິນ
ສະຫວ່າງຈ້າຢູ່ເທິງທ້ອງຟ້າທີ່ປາສະຈາກກ້ອນເຝືອໝອກ

(ພຣະວັງຄີສະເຖຣະເມື່ອຈະປະກາດຄຸນຂອງພຣະສາດສະດາແລະຂອງຕົນ ຈຶ່ງໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໑໘໖໒] ແຕ່ກ່ອນ ເຮົາເປັນຜູ້ອັນນັກປາດເຄົາລົບນັບຖື
ທ່ຽວໄປຈາກໝູ່ບ້ານໄປສູ່ໝູ່ບ້ານ ຈາກເມືອງໄປສູ່ເມືອງ
ຈຶ່ງໄດ້ເຝົ້າພຣະສຳມາສຳພຸດທະເຈົ້າຜູ້ຊົງເຖິງຝັ່ງແຫ່ງທຳທັງປວງ

[໑໘໖໓] ພຣະອົງຜູ້ເປັນພຣະມະຫາມຸນີ ຊົງເຖິງຝັ່ງແຫ່ງທຸກ
ໄດ້ຊົງສະແດງທຳໂຜດເຮົາ
ເຮົາຟັງທຳແລ້ວເກີດຄວາມເຫຼື້ອມໃສສັດທາ

[໑໘໖໔] ເຮົາໄດ້ຟັງພຣະດຳຣັດຂອງພຣະພຸດທະອົງ
ແລ້ວຮູ້ແຈ້ງເຖິງຂັນ ອາຍະຕະນະ ແລະທາດ
ຈຶ່ງໄດ້ອອກບວດເປັນບັນພະຊິດ

[໑໘໖໕] ພຣະຕະຖາຄົດທັງຫຼາຍຊົງອຸບັດເພື່ອປະໂຫຍດແກ່ສະຕີ
ແລະບຸຣຸດຜູ້ເຮັດ ຕາມຄຳສອນເປັນຈຳນວນຫຼາຍນໍ

[໑໘໖໖] ພຣະມະຫາມຸນີໄດ້ບັນລຸພຣະໂພທິຍານ
ເພື່ອປະໂຫຍດແກ່ເຫຼົ່າພິກຂຸ ແລະພິກຂຸນີຜູ້ໄດ້ເຫັນທຳ
ເຊິ່ງເປັນທາງອອກຈາກທຸກນໍແລ

[໑໘໖໗] ພຣະພຸດທະເຈົ້າຜູ້ເປັນເຜົ່າພັນແຫ່ງດວງອາທິດ
ຊົງມີພຣະຈັກຂຸ ຊົງອະນຸເຄາະຕໍ່ໝູ່ສັດ
ໄດ້ຊົງສະແດງອະຣິຍະສັດ ໔ ຄື

[໑໘໖໘] (໑) ທຸກ (໒) ເຫດໃຫ້ເກີດທຸກ (໓) ຄວາມດັບທຸກ
(໔) ອະຣິຍະມັກມີອົງ ໘ ເຊິ່ງເປັນຂໍ້ປະຕິບັດໃຫ້ເຖິງຄວາມດັບທຸກ

[໑໘໖໙] ເຮົາໄດ້ເຫັນທຳເຫຼົ່ານັ້ນ ຄື ຢ່າງທີ່ພຣະສາດສະດາຕັດໄວ້
ຕາມຄວາມເປັນຈິງແນວນີ້ ເຮົາໄດ້ບັນລຸປະໂຫຍດຕົນແລ້ວ
ໄດ້ເຮັດຕາມຄຳສັ່ງສອນຂອງພຣະພຸດທະເຈົ້າແລ້ວ

[໑໘໗໐] ການທີ່ເຮົາໄດ້ມາໃນສຳນັກຂອງພຣະພຸດທະເຈົ້າເປັນການດີສຳລັບເຮົານໍ
ຍ້ອນເຮົາໄດ້ບັນລຸທຳທີ່ປະເສີດສຸດ
ບັນດາທຳທີ່ພຣະອົງຊົງຈຳແນກໄວ້ດີແລ້ວ

[໑໘໗໑] ເຮົາໄດ້ເຖິງຝັ່ງແຫ່ງອະພິນຍາ ຊຳຣະໂສຕະທາດໃຫ້ໝົດຈົດ
ໄດ້ວິດຊາ ໓ ບັນລຸລິດ ສະຫຼາດໃນການກຳນົດຮູ້ຈິດຂອງຜູ້ອື່ນ

(ພຣະວັງຄີສະເຖຣະ ໃນເວລາທີ່ພຣະອຸປັດຊາຂອງທ່ານປະຣິນິບພານ ໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໑໘໗໒] ຂ້າພຣະອົງຂໍທູນຖາມພຣະບໍຣົມມະສາດສະດາຜູ້ມີພຣະປັນຍາຫຼາຍວ່າ
ພິກຂຸໃດມີຊື່ສຽງ ເຮືອງຍົດ ຕັດຄວາມສົງໄສ
ດັບກິເລດໄດ້ໃນປັດຈຸບັນຊາດນີ້ແລ້ວ
ໄດ້ປະຣິນິບພານທີ່ອັກຄາລະວະເຈດີວິຫານ

[໑໘໗໓] ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ
ພິກຂຸນັ້ນເຫັນທຳຄືນິບພານອັນໝັ້ນຄົງ
ເປັນພາມມາແຕ່ກຳເນີດ

ມີນາມທີ່ພຣະອົງຊົງປະທານໃຫ້ວ່າ ນິໂຄທະກັບປະ
ຜູ້ມຸ້ງແຕ່ຄວາມລຸດພົ້ນ ຜາຣົບຄວາມພຽນ
ຍັງຂາບໄຫວ້ທ່ານຢູ່

[໑໘໗໔] ຂ້າແດ່ ພຣະອົງຜູ້ເປັນເຈົ້າສາກະຍະ ເຊິ່ງມີພຣະຈັກຂຸຮອບຄອບ
ແມ່ນຂ້າພຣະອົງທຸກອົງ ປາຖະໜາຈະຮູ້ເຖິງພຣະສາວົກອົງນັ້ນ
ຂ້າພຣະອົງທັງຫຼາຍພ້ອມທີ່ຈະງ່ຽງໂສດລົງຟັງ
ພຣະອົງບໍ່ແມ່ນບໍເປັນສາດສະດາ ພຣະອົງເປັນຜູ້ປະເສີດ

[໑໘໗໕] ຂ້າແດ່ ພຣະອົງຜູ້ມີພຣະປັນຍາຄືແຜ່ນດິນ
ຂໍພຣະອົງໂຜດຕັດຄວາມເຄືອບແຄງສົງໄສຂອງຂ້າພຣະອົງທັງຫຼາຍ
ໂຜດຕັດບອກພຣະນິໂຄດກັບປະເຖຣະຜູ້ປະຣິນິບພານແລ້ວນັ້ນ
ໃຫ້ຂ້າພຣະອົງຮູ້ດ້ວຍເທີ້ນ
ຂ້າແດ່ ພຣະອົງຜູ້ມີພຣະຈັກຂຸຮອບຄອບ
ຂໍພຣະອົງໂຜດຕັດບອກທ່າມກາງແຫ່ງຂ້າພຣະອົງທັງຫຼາຍເທີ້ນ
ຄືທ້າວສັກກະຜູ້ມີພຣະເນດເປັນພັນຕັດບອກແກ່ເຫຼົ່າເທວະດາ

[໑໘໗໖] ກິເລດເຄື່ອງຮ້ອຍຮັດເຫຼົ່າໃດເຫຼົ່າໜຶ່ງໃນໂລກນີ້
ເປັນທາງກໍ່ໃຫ້ເກີດຄວາມລຸ້ມຫຼົງ ເປັນຝ່າຍແຫ່ງຄວາມບໍ່ຮູ້
ເປັນມູນຖານແຫ່ງຄວາມເຄືອບແຄງສົງໄສ
ກິເລດເຄື່ອງຮ້ອຍຮັດເຫຼົ່ານັ້ນພໍມາເຖິງພຣະຕະຖາຄົດເຊິ່ງມີພຣະຈັກຂຸ
ມີພຣະຄຸນຍິ່ງກວ່ານໍຣະຊົນທັງຫຼາຍນີ້ແລ ຍ່ອມໝົດໄປ

[໑໘໗໗] ຖ້າພຣະຜູ້ມີພຣະພາກເຈົ້າຈະເປັນບຸຣຸດແຕ່ພຽງກຳເນີດ
ກໍຈຶ່ງຈະບໍ່ຊົງທຳລາຍກິເລດໄດ້
ຄືລົມພັດທຳລາຍກ້ອນເຝື້ອໝອກທີ່ໜາທຶບບໍ່ໄດ້
ໂລກທັງມວນທີ່ມືດຢູ່ແລ້ວ ກໍຍິ່ງຈະມືດໜັກລົງ
ພຣະສາວົກທັງຫຼາຍ ມີພຣະສາຣີບຸດເປັນຕົ້ນ ທີ່ຮຸ່ງເຮືອງຢູ່ແດ່
ກໍຈຶ່ງຈະບໍ່ຮຸ່ງເຮືອງຫຼາຍ

[໑໘໗໘] ນັກປາດທັງຫຼາຍ ເປັນຜູ້ເຮັດແສງສະຫວ່າງໃຫ້ເກີດ
ຂ້າແດ່ພຣະອົງຜູ້ຊົງພຣະປີຊາຍານ
ຍ້ອນເຫດນັ້ນ ຂ້າພຣະອົງເຂົ້າໃຈພຣະອົງວ່າ
ຊົງເຮັດແສງສະຫວ່າງໃຫ້ເກີດເປັນທີ່ແນ່ນອນ

ຂ້າພຣະອົງທັງຫຼາຍຮູ້ວ່າພຣະອົງຊົງເຫັນທຳທັງປວງ
ໄດ້ຢ່າງແຈ່ມແຈ້ງ ຈຶ່ງໄດ້ພາກັນມາເຝົ້າ
ຂໍພຣະອົງໂຜດປະກາດພຣະນິໂຄດກັບປະເຖຣະ
ແກ່ຂ້າພຣະອົງທັງຫຼາຍ ໃນບໍລິສັດດ້ວຍເທີ້ນ

[໑໘໗໙] ພຣະອົງຊົງເປ່ງພຣະວາຈາອັນມ່ວນຈັບໃຈ
ທັງຊົງເປ່ງດ້ວຍພຣະສຸຣະສຽງກັງວານທີ່ເກີດ
ແຕ່ພຣະນາສິກທີ່ບຸນຍາທິການຕົກແຕ່ງມາດີແລ້ວ
ໄດ້ຢ່າງວ້ອງໄວແຜ່ວເບົາ ຄືພະຍາຫົງຄຳ ໂກ່ງຄໍຂັນເບົາ ໆ ຢ່າງມ່ວນ
ຂ້າພຣະອົງທຸກອົງຕັ້ງໃຈແນ່ວແນ່
ຂໍຟັງພຣະດຳຣັດທີ່ມ່ວນຂອງພຣະອົງ

[໑໘໘໐] ຂ້າພຣະອົງຈະເປີດເຜີຍຄວາມເກີດແລະຄວາມຕາຍທີ່ລະໄດ້ຢ່າງໝົດສິ້ນ
ຈະສະແດງບອກບາບທຳເຊິ່ງເປັນໂຕກຳຈັດ
ຍ້ອນບັນດາປຸຖຸຊົນແລະເສຂະບຸກຄົນເປັນຕົ້ນ
ຜູ້ທີ່ເຮັດໄດ້ຕາມຄວາມພໍໃຈຕົນບໍ່ມີ
ຄືຄົນທີ່ຮີບຕອງພິຈາລະນາຕາມພຣະຕະຖາຄົດທໍ່ນັ້ນ
ສາມາດທີ່ຈະຮູ້ຫຼືກ່າວທຳແນວທີ່ໂຕຕ້ອງການໄດ້

[໑໘໘໑] ພຣະດຳຣັດຂອງພຣະອົງນີ້ມີໄວຍາກອນສົມບູນ
ພຣະອົງຊົງມີພຣະປັນຍາກົງໄປກົງມາຕັດໄວ້ຢ່າງຖືກຕ້ອງ
ຂ້າພຣະອົງກໍຮຽນມາດີແລ້ວ
ການຖວາຍບັງຄົມທີ່ຂ້າພຣະອົງຖວາຍຢ່າງນອບນ້ອມນີ້ເປັນຄັ້ງສຸດທ້າຍ
ຂ້າແດ່ພຣະອົງຜູ້ມີພຣະປັນຍາຫຼາຍ
ພຣະອົງຊົງຮູ້ຄະຕິຂອງພຣະນິໂຄດກັບປະເຖຣະໄດ້
ບໍ່ຍັງຂ້າພຣະອົງໃຫ້ຫຼົງ

[໑໘໘໔] ຂ້າແດ່ພຣະອົງຜູ້ມີຄວາມພຽນຫຼາຍ
ພຣະອົງຊົງຕັດສະຮູ້ອະຣິຍະທຳທັງທີ່ເປັນໂລກຸດຕະຣະແລະໂລກິຍະ
ຊົງຮູ້ເຍີຍຍະທຳທັງໝົດໄດ້
ບໍ່ຍັງຂ້າພຣະອົງໃຫ້ຫຼົງ
ຂ້າພຣະອົງຫວັງພຣະດຳຣັດຂອງພຣະອົງເປັນຢ່າງຍິ່ງ
ຄືຄົນຖືກຄວາມຮ້ອນແຜດເຜົາໃນລະດູຮ້ອນ

ກໍຕ້ອງການນໍ້າເປັນຢ່າງຍິ່ງ
ຂໍພຣະອົງຊົງຍັງຝົນຄືພຣະທຳເທດມາສະໜາ
ທີ່ຂ້າພຣະອົງຟັງມາແລ້ວໃຫ້ຕົກລົງເທີ້ນ

[໑໘໗໓] ພຣະນິໂຄດກັບປະເຖຣະໄດ້ປະພຶດພົມມະຈັນເພື່ອປະໂຫຍດໃດ
ປະໂຫຍດຂອງທ່ານນັ້ນບໍ່ສູນເປົ່າບໍ
ທ່ານນິບພານດ້ວຍສະອຸປາທິເສສະນິບພານ
ຫຼືນິບພານດ້ວຍອະນຸປາທິເສສະນິບພານທາດ
ຂ້າພຣະອົງທັງຫຼາຍຂໍຟັງເລື້ອງນັ້ນ

(ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ)

[໑໘໗໔] ພຣະນິໂຄດກັບປະເຖຣະນັ້ນໄດ້ຕັດຂາດຕັນຫາໃນນາມຣູບນີ້
ທັງຕັດກະແສແຫ່ງທຳຝ່າຍດຳ
ເຊິ່ງນອນຈົມຢູ່ໃນສັນດານມາດົນນານ
ຂ້າມພົ້ນຊາດມໍລະນະໄດ້ຢ່າງໝົດສິ້ນ
ພຣະຜູ້ມີພຣະພາກເຈົ້າຜູ້ປະເສີດດ້ວຍພະລະທຳ ໕ ປະການໄດ້ຕັດໄວ້ດັ່ງນີ້

(ພຣະວັງຄີສະເຖຣະຂາບທູນດ້ວຍພາສິດເຫຼົ່ານີ້ວ່າ)

[໑໘໗໕] ຂ້າແດ່ ພຣະອົງຜູ້ຊົງເປັນພຸດທະ
ຂ້າພຣະອົງນີ້ຟັງພຣະດຳຣັດຂອງພຣະອົງແລ້ວຍ່ອມເຫຼື້ອມໃສ
ຮູ້ວ່າ ເລື້ອງທີ່ຂ້າພຣະອົງທູນຖາມແລ້ວ ບໍ່ຂາດປະໂຫຍດ
ພຣະອົງເປັນພຸດທະເຈົ້າບໍ່ຊົງລວງຂ້າພຣະອົງແນ່ນອນ

[໑໘໗໖] ສາວົກຂອງພຣະພຸດທະອົງເວົ້າແນວໃດ ກໍເຮັດແນວນັ້ນ
ໄດ້ຕັດຕາໜ່າງຄືຕັນຫາທີ່ແຜ່ກວ້າງທັງໝັ້ນຄົງຂອງພະຍາມານຂີ້ສໍ້ໄດ້ຂາດ

[໑໘໗໗] ພຣະຜູ້ມີພຣະພາກເຈົ້າສົມຄວນທີ່ຈະຕັດວ່າ
ທ່ານນິໂຄດກັບປະເຖຣະໄດ້ເຫັນມູນເຫດແຫ່ງອຸປາທານ
ລ່ວງພົ້ນບ້ວງມັດຈຸຣາດທີ່ຂ້າມໄດ້ແສນຍາກແລ້ວ

(ພຣະວັງຄີສະເຖຣະເມື່ອຈະປະກາດຄວາມເຫຼື້ອມໃສ ຈຶ່ງໄດ້ກ່າວພາສິດສຸດທ້າຍວ່າ)

[໑໘໗໘] ຂ້າແດ່ ພຣະຜູ້ມີພຣະພາກເຈົ້າຜູ້ສູງສຸດກວ່າເທວະດາແລະມະນຸດ

ຂ້າພຣະອົງຂໍຂາບໄຫວ້ທ່ານພຣະນິໂຄດກັບປະເຖຣະ
ຜູ້ເປັນວິສຸດທິເທບ ເປັນອະນຸຊາຕະບຸດ
ມີຄວາມພຽນຫຼາຍ ເປັນຜູ້ປະເສີດ
ທັງເປັນໂອຣົດຂອງພຣະອົງຜູ້ປະເສີດນັ້ນ
ຮູ້ວ່າ ທ່ານພຣະວັງຄີສະເຖຣະໄດ້ກ່າວພາສິດທັງຫຼາຍໄວ້
ດ້ວຍປະການດັ່ງນີ້ແລ

**ມະຫານິບາດ ຈົບ**

## ລວມເລື້ອງພຣະເຖຣະທີ່ມີໃນນິບາດນີ້ ຄື

ໃນສັດຕະຕິນິບາດ (ມະຫານິບາດ) ນີ້
ພຣະວັງຄີສະເຖຣະຜູ້ກະຈັກກະຈາຍອົງດຽວທ່ໍນັ້ນ
ບໍ່ມີພຣະເຖຣະອົງອື່ນ ແລະ ມີ ກາ໑ ພາສິດ ດັ່ງນີ້ແລ

**ເຖຣະຄາຖາ ຈົບ**

## ສະຫຼຸບຄວາມເຖຣະຄາຖານີ້

ພຣະເຖຣະ ໒໖໔ ອົງ ຜູ້ເປັນພຸດທະບຸດ ບໍ່ມີອາສະວະ
ບັນລຸນິບພານອັນເປັນແດນກະເສມ ພາກັນບັນລືສີຫະນາດ
ປະກາດພາສິດໄວ້ລວມ ໑,໓໖໐ ພາສິດ
ແລ້ວກໍພາກັນນິບພານຄືກອງໄຟໝົດເຊື້ອແລ້ວດັບໄປ ດັ່ງນີ້ແລ

**ເຖຣະຄາຖາ ຈົບ**

# ພຣະສູດຕັນຕະປິດົກ

## ຂຸດທະກະນິກາຍ ເຖຣີຄາຖາ

**ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ພຣະອົງນັ້ນ**

# ໑. ເອກກະນິບາດ

## ໑. ອັນຍະກາເຖຣີຄາຖາ

### ພາສິດຂອງພຣະອັນຍະກາເຖຣີ

ຮູ້ວ່າ ພຣະເຖຣີຮູບໜຶ່ງເຊິ່ງບໍ່ຜາກົດຊື່ໄດ້ກ່າວພາສິດນີ້ວ່າ

[໑] ພຣະເຖຣີທ່ານຈົ່ງໃຊ້ທ່ອນຜ້າເຮັດຈີວອນນຸ່ງຫົ່ມ
ແລ້ວພັກຜ່ອນຕາມສະບາຍເທີ້ນ ຍ້ອນຣາຄະຂອງທ່ານສະງົບແລ້ວ
ຄືສົ້ມຜັກແຫ້ງຢູ່ໃນໝໍ້

## ໒. ມຸດຕາເຖຣີຄາຖາ

### ພາສິດຂອງພຣະມຸດຕາເຖຣີ

(ພຣະມຸດຕາເຖຣີຮັບພຣະພຸດທະໂອວາດແລ້ວໄດ້ກ່າວພາສິດນີ້ວ່າ)

[໒] ມຸດຕາ ທ່ານຈົ່ງພົ້ນໄປຈາກໂຍຄກິເລດທັງຫຼາຍ໑
ຄືດວງຈັນພົ້ນຈາກກຶກຣາຫູຈັບ
ທ່ານຈົ່ງມີຈິດລຸດພົ້ນແລ້ວບໍຣິໂພກກ້ອນເຂົ້າອັນບໍ່ມີໜີ້ເທີ້ນ

## ໓. ປຸນນາເຖຣີຄາຖາ

### ພາສິດຂອງພຣະປຸນນາເຖຣີ

(ພຣະປຸນນາເຖຣີຮັບພຣະພຸດທະໂອວາດແລ້ວໄດ້ກ່າວພາສິດນີ້ວ່າ)

[໓]　　ປຸນນາ ທ່ານຈົ່ງຍັງທຳທັງຫຼາຍໃຫ້ບໍລິບູນ
ຄືດວງຈັນມື້ເພັງ
ຈົ່ງທຳລາຍກອງແຫ່ງຄວາມມືດດ້ວຍປັນຍາທີ່ບໍລິບູນ

## ໔. ຕິດສາເຖຣີຄາຖາ

### ພາສິດຂອງພຣະຕິດສາເຖຣີ

(ພຣະຕິດສາເຖຣີຮັບພຣະພຸດທະໂອວາດແລ້ວໄດ້ກ່າວພາສິດນີ້ວ່າ)

[໔]　　ຕິດສາ ທ່ານຈົ່ງສຶກສາໃນໄຕຣສິກຂາ
ໂຍຄະກິເລດທັງຫຼາຍຢ່າໄດ້ຄອບງຳທ່ານເລີຍ
ທ່ານຈົ່ງພາກຈາກກິເລດໂຍຄະທັງໝົດ
ທ່ອງທ່ຽວໄປໃນໂລກຢ່າງບໍ່ມີອາສະວະເທີ້ນ

## ໕. ອັນຍະກາຕິດສາເຖຣີຄາຖາ

### ພາສິດຂອງພຣະຕິດສາເຖຣີອີກອົງໜຶ່ງ

ພຣະຕິດສາເຖຣີອີກອົງໜຶ່ງ (ຮັບພຣະພຸດທະໂອວາດແລ້ວໄດ້ກ່າວພາສິດນີ້ວ່າ)

[໕]　　ຕິດສາ ທ່ານຈົ່ງປະກອບທຳທັງຫຼາຍເທີ້ນ
ຂະນະຢ່າໄດ້ລ່ວງເລີຍທ່ານໄປ
ຍ້ອນຜູ້ທີ່ມີຂະນະລ່ວງເລີຍໄປແລ້ວ
ຈະຕ້ອງເສົ້າໂສກແອອັດກັນຢູ່ໃນນະຣົກ

## ໖. ທີຣາເຖຣີຄາຖາ

### ພາສິດຂອງພຣະທີຣາເຖຣີ

ພຣະທີຣາເຖຣີ (ຮັບພຣະພຸດທະໂອວາດແລ້ວໄດ້ກ່າວພາສິດນີ້ວ່າ)

[໖]　　ທີຣາ ທ່ານຈົ່ງສຳຜັດນິໂຣດເຊິ່ງເປັນຄວາມສະງົບ
ລະງັບສັນຍາອັນເປັນສຸກ
ຈົ່ງຍິນດີນິບພານທີ່ຍອດຢ້ຽມເຊິ່ງປອດໂປ່ງໂຍຄະກິເລດເທີ້ນ

## ໗. ອັນຍະກາທີຣາເຖຣີຄາຖາ

### ພາສິດຂອງພຣະທີຣາເຖຣີອີກອົງໜຶ່ງ

ພຣະທີຣາເຖຣີອີກອົງໜຶ່ງ (ຮັບພຣະພຸດທະໂອວາດແລ້ວໄດ້ກ່າວພາສິດນີ້ວ່າ)

[໗] ທີຣາພິກຂຸນີຜູ້ອົບຮົມອິນຊີແລ້ວດ້ວຍທຳທັງຫຼາຍທີ່ຊົງໄວ້
ຍ່ອມຊະນະມານ¹ພ້ອມທັງເສນາມານ²
ແລ້ວດຳລົງໄວ້ເຊິ່ງກາຍທີ່ມີໃນພົບສຸດທ້າຍ

## ໘. ມິດຕາເຖຣີຄາຖາ

### ພາສິດຂອງພຣະມິດຕາເຖຣີ

ພຣະມິດຕາເຖຣີ (ຮັບພຣະພຸດທະໂອວາດແລ້ວໄດ້ກ່າວພາສິດນີ້ວ່າ)

[໘] ມິດຕາ ທ່ານບວດແລ້ວດ້ວຍສັດທາ
ຈົ່ງຍິນດີໃນກັນລະຍານະມິດ
ຈະເລີນກຸສົນທຳເພື່ອບັນລຸທຳທີ່ປອດໂປ່ງຈາກໂຍຄະກິເລດເທີ້ນ

## ໙. ພັດທະຣາເຖຣີຄາຖາ

### ພາສິດຂອງພຣະພັດທະຣາເຖຣີ

ພຣະພັດທະຣາເຖຣີ (ຮັບພຣະພຸດທະໂອວາດແລ້ວໄດ້ກ່າວພາສິດນີ້ວ່າ)

[໙] ພັດທະຣາ ທ່ານບວດແລ້ວດ້ວຍສັດທາ
ຈົ່ງຍິນດີໃນທຳທີ່ດີງາມ
ຈະເລີນກຸສົນທຳເພື່ອບັນລຸທຳທີ່ຍອດຢ້ຽມ
ເຊິ່ງປອດໂປ່ງຈາກໂຍຄະກິເລດເທີ້ນ

## ໑໐. ອຸປະສະມາເຖຣີຄາຖາ

### ພາສິດຂອງພຣະອຸປະສະມາເຖຣີ

ພຣະອຸປະສະມາເຖຣີ(ຮັບພຣະພຸດທະໂອວາດແລ້ວໄດ້ກ່າວພາສິດນີ້ວ່າ)

[໑໐] ອຸປະສະມາ ທ່ານເພິ່ງຂ້າມໂອຄະ⁹ເຊິ່ງເປັນບ້ວງມານທີ່ຂ້າມໄດ້ແສນຍາກ
ຈົ່ງຊະນະມານພ້ອມທັງເສນາມານ
ດຳລົງໄວ້ເຊິ່ງກາຍທີ່ມີໃນພົບສຸດທ້າຍເທີ້ນ
໑໑. ມຸດຕາເຖຣີຄາຖາ
ພາສິດຂອງພຣະມຸດຕາເຖຣີ
ພຣະມຸດຕາເຖຣີ(ຮັບພຣະພຸດທະໂອວາດແລ້ວໄດ້ກ່າວພາສິດນີ້ວ່າ)

[໑໑] ເຮົາເປັນຜູ້ພົ້ນດ້ວຍດີ ພົ້ນໂດຍຖືກຕ້ອງດ້ວຍຄວາມພົ້ນຈາກ
ຄວາມກ່ອມ ໓ ຢ່າງ ຄື
(໑) ກ່ອມຍ້ອນຄົກ (໒) ກ່ອມຍ້ອນສາກ (໓) ກ່ອມຍ້ອນສາມີ
ເປັນຜູ້ພົ້ນຈາກຄວາມເກີດແລະຄວາມຕາຍ
ຖອນຕັນຫາທີ່ນຳໄປສູ່ພົບໄດ້ແລ້ວ

## ໑໒. ທຳມະທິນນາເຖຣີຄາຖາ

### ພາສິດຂອງພຣະທຳມະທິນນາເຖຣີ

ພຣະທຳມະທິນນາເຖຣີ (ຮັບພຣະພຸດທະໂອວາດແລ້ວໄດ້ກ່າວພາສິດນີ້ວ່າ)

[໑໒] ຜູ້ທີ່ເກີດສັນທະມີອັດຕະພາບສຸດທ້າຍກໍເພິ່ງສຳຜັດນິບພານດ້ວຍໃຈ
ມີຈິດບໍ່ປະຕິພັດໃນກາມທັງຫຼາຍ
ບັນດິດຮຽກວ່າ ຜູ້ມີກະແສໃນເບື້ອງເທິງ໑

## ໑໓. ວິສາຂາເຖຣີຄາຖາ

### ພາສິດຂອງພຣະວິສາຂາເຖຣີ

ພຣະວິສາຂາເຖຣີ(ຮັບພຣະພຸດທະໂອວາດແລ້ວໄດ້ກ່າວພາສິດນີ້ວ່າ)

[໑໓] ທ່ານທັງຫຼາຍ ຈົ່ງເຮັດຕາມຄຳສອນຂອງພຣະພຸດທະເຈົ້າ
ທີ່ບຸກຄົນເຮັດແລ້ວບໍ່ເດືອດຮ້ອນໃນພາຍຫຼັງ
ຈົ່ງຟ້າວລ້າງຕີນທັງສອງ ແລ້ວນັ່ງ ໃນບ່ອນອັນສົມຄວນເທີ້ນ

# ໑໔. ສຸມະນາເຖຣີຄາຖາ

## ພາສິດຂອງພຣະສຸມະນາເຖຣີ

ພຣະສຸມະນາເຖຣີ (ຮັບພຣະພຸດທະໂອວາດແລ້ວໄດ້ກ່າວພາສິດນີ້ວ່າ)

[໑໔] ທ່ານພິຈາລະນາເຫັນທາດທັງຫຼາຍວ່າເປັນທຸກແລ້ວຢ່າມາເກີດອີກ
ຄາຍຄວາມພໍໃຈໃນພົບແລ້ວ ຈະເປັນຜູ້ສະງົບລະງັບທ່ອງທ່ຽວໄປ

# ໑໕. ອຸດຕະຣາເຖຣີຄາຖາ

## ພາສິດຂອງພຣະອຸດຕະຣາເຖຣີ

ພຣະອຸດຕະຣາເຖຣີ (ຮັບພຣະພຸດທະໂອວາດແລ້ວໄດ້ກ່າວພາສິດນີ້ວ່າ)

[໑໕] ເຮົາເປັນຜູ້ສັງລວມກາຍ ວາຈາ ແລະໃຈ
ຖອນຕັນຫາພ້ອມທັງມູນຮາກໄດ້ແລ້ວ ເປັນຜູ້ເຢັນດັບດີແລ້ວ

# ໑໖. ວຸດທະປັບພະຊິຕະສຸມະນາເຖຣີຄາຖາ

## ພາສິດຂອງພຣະສຸມະນາເຖຣີຜູ້ບວດເມື່ອແກ່

ພຣະວຸດທະປັບພະຊິຕະສຸມະນາເຖຣີ (ຮັບພຣະພຸດທະໂອວາດແລ້ວໄດ້ກ່າວພາສິດນີ້ວ່າ)

[໑໖] ສຸມະນາຜູ້ເຖົ້າ ທ່ານຈົ່ງໃຊ້ທ່ອນຜ້າເຮັດຈີວອນນຸ່ງຫົ່ມ
ແລ້ວພັກຜ່ອນຕາມສະບາຍເທີ້ນ
ຍ້ອນທ່ານມີຣາຄະສະງົບລະງັບແລ້ວ
ເປັນຜູ້ເຢັນ ດັບດີແລ້ວ

# ໑໗. ທຳມາເຖຣີຄາຖາ

## ພາສິດຂອງພຣະທຳມາເຖຣີ

ພຣະທຳມາເຖຣີ(ຮັບພຣະພຸດທະໂອວາດແລ້ວໄດ້ກ່າວພາສິດນີ້ວ່າ)

[໑໗] ເຮົາທຸບພົນລະພາພ ມີກາຍສັ່ນເທົາ ຖືໄມ້ການເທົ້າທ່ຽວບິນທະບາດ

ໄດ້ລົ້ມລົງເທິງແຜ່ນດິນກົງນັ້ນເອງ
ເວລານັ້ນ ຈິດຂອງເຮົາລຸດພົ້ນແລ້ວ
ຍ້ອນເຫັນໂທດໃນກາຍ

## ໑໗. ສັງຄາເຖຣີຄາຖາ

### ພາສິດຂອງພຣະສັງຄາເຖຣີ

ພຣະສັງຄາເຖຣີ(ຮັບພຣະພຸດທະໂອວາດແລ້ວໄດ້ກ່າວພາສິດນີ້ວ່າ)

[໑໗] ເຮົາລະເຮືອນ ບຸດ ແລະສັດລ້ຽງເຊິ່ງເປັນທີ່ຮັກ ບວດແລ້ວ
ລະຣາຄະໂທສະ ແລະຄາຍອະວິດຊາສາ
ຖອນຕັນຫາພ້ອມທັງມູນຮາກໄດ້ແລ້ວ
ເປັນຜູ້ສະງົບລະງັບ ດັບເຢັນແລ້ວ

**ເອກກະນິບາດ ຈົບ**

# ໒. ທຸກະນິບາດ

## ໑. ອະພິຮູບປະນັນທາເຖຣີຄາຖາ

ພາສິດຂອງພຣະນັນທາເຖຣີ

ຮູ້ວ່າ ພຣະຜູ້ມີພຣະພາກເຈົ້າຕັດສອນນັນທາສິກຂະມານາຜູ້ຍິນດີໃນຮູບທີ່ສວຍງາມເນືອງ ໆ ດ້ວຍພຣະຄາຖາເຫຼົ່ານີ້ (ພາຍຫຼັງພຣະເຖຣີບັນລຸອະຣະຫັດຕະຜົນແລ້ວໄດ້ກ່າວພາສິດນີ້ວ່າ)

[໑໙] ນັນທາ ທ່ານຈົ່ງພິຈາລະນາເບິ່ງກາຍເຊິ່ງກະສັບກະສ່າຍ
ບໍ່ສະອາດ ເປັນຂອງເປື່ອຍເນົ່າ
ຈົ່ງອົບຮົມຈິດໃຫ້ຕັ້ງໝັ້ນດີ ມີອາລົມດຽວ ດ້ວຍອະສຸພະພາວະນາເທີ້ນ
[໒໐] ແລະຈົ່ງອົບຮົມອະນິມິດຕະວິໂມກ
ລະອະນຸໄສຄືມານະສາ
ຍ້ອນລະມານະໄດ້ ແຕ່ນັ້ນທ່ານຈະຢູ່ຢ່າງສະງົບ

## ໒. ເຊນະຕາເຖຣີຄາຖາ

### ພາສິດຂອງພຣະເຊນະຕາເຖຣີ

ຮູ້ວ່າ ພຣະເຊນະຕາເຖຣີໄດ້ກ່າວພາສິດເຫຼົ່ານີ້ວ່າ

[໔໑] ໂພດຊົງ ໆ ປະການເປັນທາງບັນລຸນິບພານນີ້
ເຮົາຈະເລີນແລ້ວທັງໝົດຕາມທີ່ພຣະພຸດທະເຈົ້າຊົງສະແດງໄວ້

[໔໒] ຍ້ອນເຮົາໄດ້ເຫັນພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນແລ້ວ
ຮ່າງກາຍນີ້ເປັນຮ່າງກາຍທີ່ມີໃນພົບສຸດທ້າຍ
ຊາດສົງສານໝົດແລ້ວ
ບັດນີ້ບໍ່ມີການເກີດອີກ

## ໓. ສຸມັງຄະລະມາຕາເຖຣີຄາຖາ

### ພາສິດຂອງພຣະສຸມັງຄະລະມາຕາເຖຣີ

ພຣະສຸມັງຄະລະມາຕາເຖຣີ (ໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໔໓] ເຮົາພົ້ນດີແລ້ວ ໃນການພົ້ນດີແລ້ວ ເປັນຜູ້ພົ້ນແລ້ວໂດຍຖືກຕ້ອງຈາກສາກ
ຈາກສາມີຂອງເຮົາຜູ້ບໍ່ມີຫິຣິ ຈາກຮົ່ມ ຈາກໝໍ້ເຂົ້າ ແລະຈາກງູນ້ຳ

[໔໔] ເຮົາກຳລັງຕັດຣາຄະ ແລະໂທສະ ອາໄສເຫງົ້າໄມ້
ເຂົ້າຊານຢູ່ໂດຍຄວາມສຸກວ່າ ສຸກນໍ

## ໔. ອັດທະກາສີເຖຣີຄາຖາ

### ພາສິດຂອງພຣະອັດທະກາສີເຖຣີ

ພຣະອັດທະກາສີເຖຣີ (ໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໔໕] ສ່ວຍຂອງເຮົາມີປະມານທີ່ສ່ວຍໃນກາສີຊົນນະບົດ
ຊາວນິຄົມກຳນົດລາຄາແຄວ້ນກາສີນັ້ນໄວ້ແລ້ວ
ຈຶ່ງຕັ້ງລາຄາເຮົາໄວ້ເຄິ່ງໜຶ່ງ

[໔໖] ພາຍຫຼັງ ເຮົາເບື່ອໜ່າຍໃນຮູບ
ແລະເມື່ອເບື່ອໜ່າຍຈຶ່ງຄາຍຄວາມກຳໜັດ
ເຮົາຢ່າເພິ່ງແລ່ນໄປສູ່ຊາດສົງສານຢູ່ປະຈຳ ໆ ອີກເລີຍ
ເຮົາບັນລຸວິດຊາ ໓ ໄດ້ເຮັດຕາມຄຳສັ່ງສອນຂອງພຣະພຸດທະເຈົ້າແລ້ວ

# ໕. ຈິດຕາເຖຣີຄາຖາ

## ພາສິດຂອງພຣະຈິດຕາເຖຣີ

ພຣະຈິດຕາເຖຣີ (ໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໔໗] ເຮົາເປັນຜູ້ມີຮ່າງກາຍຜ່າຍຜອມ ເປັນໄຂ້ ອ່ອນເພຍຫຼາຍ
ຕ້ອງຍ່າງຖືໄມ້ການເທົ້າໄປໄສ ໆ ກໍແມ່ນຢູ່
ເຖິງແນວນັ້ນ ກໍຍັງຂຶ້ນພູໄດ້

[໔໘] ເຮົາເກັບຜ້າສັງຄາຕິ ແລະຂວ້ຳບາດແລ້ວ
ຂົ່ມຕົນທຳລາຍກອງຄວາມມືດໄດ້ແລ້ວເທິງພູ
໖. ເມດຕິກາເຖຣີຄາຖາ
ພາສິດຂອງພຣະເມດຕິກາເຖຣີ
ພຣະເມດຕິກາເຖຣີ(ໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໔໙] ເຮົາປະສົບທຸກ ເສື່ອມກຳລັງ ຜ່ານໄວສາວໄປແລ້ວ
ຕ້ອງຍ່າງຖືໄມ້ການເທົ້າໄປໄສ ໆ ກໍແມ່ນຢູ່
ເຖິງແນວນັ້ນ ກໍຍັງຂຶ້ນພູໄດ້

[໕໐] ເຮົາເກັບຜ້າສັງຄາຕິ ແລະຂວ້ຳບາດແລ້ວ ນັ່ງເທິງພູ
ຄັ້ງນັ້ນ ຈິດຂອງເຮົາລຸດພົ້ນແລ້ວ
ເຮົາໄດ້ບັນລຸວິດຊາ ໓ ໄດ້ເຮັດຕາມຄຳສັ່ງສອນຂອງພຣະພຸດທະເຈົ້າແລ້ວ

# ໗. ມິດຕາເຖຣີຄາຖາ

## ພາສິດຂອງພຣະມິດຕາເຖຣີ

ພຣະມິດຕາເຖຣີ (ໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໕໑] ເຮົາຍິນດີເພີດເພີນເທບນິກາຍ
ຈຶ່ງເຂົ້າຈຳອຸໂປສົດເຊິ່ງປະກອບດ້ວຍອົງ ໘
ເມິດມື້ ໑໔ ຄ່ຳ ໑໕ ຄ່ຳ ໘ ຄ່ຳແຫ່ງປັກ
ແລະຕະຫຼອດປາຕິຫາຣິຍະປັກ

[໓໔] ເຮົາເມື່ອປາຖະໜາໝູ່ເທບຈຶ່ງໄດ້ເຂົ້າຈຳອຸໂປສົດນີ້ນີ້
ເຮົານັ້ນສັນອາຫານຄາບດຽວ
ແຖຜົມ ຫົ່ມຜ້າສັງຄາຕິ ບວດແລ້ວ
ບໍ່ເພິ່ງປາຖະໜາເທບນິກາຍ
ກຳຈັດຄວາມກະວົນກະວາຍໃນໃຈໄດ້

## ໘. ອະພະຍະມາຕຸເຖຣີຄາຖາ
## ພາສິດຂອງພຣະອະພະຍະມາຕຸເຖຣີ

ພຣະອະພະຍະມາຕຸເຖຣີ (ໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໓໓] ແມ່ເຈົ້າ ທ່ານຈົ່ງພິຈາລະນາຮ່າງກາຍນີ້ ເບື້ອງເທິງຕັ້ງແຕ່ພື້ນຕີນຂຶ້ນໄປ ເບື້ອງລຸ່ມຕັ້ງແຕ່ປາຍຜົມລົງມາວ່າ ເປັນຂອງບໍ່ສະອາດ ມີກິ່ນເໝັນເນົ່າ

[໓໔] ເຮົາພິຈາລະນາຢູ່ຢ່າງນີ້ ຈຶ່ງຖອນຣາຄະທັງປວງໄດ້ ຕັດຄວາມຮ້ອນຮົນໄດ້ຂາດ ເປັນຜູ້ເຢັນດັບດີແລ້ວ

## ໙. ອະພະຍາເຖຣີຄາຖາ
## ພາສິດຂອງພຣະອະພະຍາເຖຣີ

ພຣະອະພະຍາເຖຣີ (ໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໓໕] ອະພະຍາ ກາຍເຊິ່ງປຸຖຸຊົນທັງຫຼາຍຂ້ອງຢູ່ ມີສະພາວະທີ່ຈະຕ້ອງແຕກໄປ ເຮົາຈະເປັນຜູ້ມີສະຕິສຳປະຊັນຍະຢູ່ສະເພາະໜ້າ ລະຖິ້ມກາຍນີ້ສາ

[໓໖] ເຮົາຖືກທຸກຫຼວງຫຼາຍກະທົບແລ້ວ ຈຶ່ງຍິນດີໃນຄວາມບໍ່ຜະໝາດ ບັນລຸຄວາມສິ້ນຕັນຫາ ໄດ້ເຮັດຕາມຄຳສັ່ງສອນຂອງພຣະພຸດທະເຈົ້າແລ້ວ

## ໑໐. ສາມາເຖຣີຄາຖາ
## ພາສິດຂອງພຣະສາມາເຖຣີ

ພຣະສາມາເຖຣີ (ໄດ້ກ່າວພາສິດນີ້ວ່າ)

[໓໗] ເຮົາບັງຄັບຈິດໃຫ້ຢູ່ໃນອຳນາດບໍ່ໄດ້ ຈຶ່ງບໍ່ໄດ້ຄວາມສະງົບໃຈ

ຕ້ອງເຂົ້າອອກຈາກບ່ອນຢູ່ເຖິງ ໔-໕ ຄັ້ງ
ຕັ້ງແຕ່ໄດ້ຮັບໂອວາດຂອງພຣະອານົນເຖຣະແລ້ວ
ໃນຄືນທີ ໗ ເຮົານັ້ນຈຶ່ງຖອນຕັນຫາໄດ້

[໓໗] ເຮົາຖືກທຸກຫຼວງຫຼາຍກະທົບແລ້ວ ຈຶ່ງຍິນດີໃນຄວາມບໍ່ຜະໝາດ
ບັນລຸຄວາມສິ້ນຕັນຫາ ໄດ້ເຮັດຕາມຄຳສັ່ງສອນຂອງພຣະພຸດທະເຈົ້າແລ້ວ

**ທຸກະນິບາດ ຈົບ**

# ໓. ຕິກະນິບາດ

## ໑. ອຸປະຣາສາມາເຖຣີຄາຖາ

### ພາສິດຂອງພຣະອຸປະຣາສາມາເຖຣີ

ພຣະອຸປະຣາສາມາເຖຣີ (ໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໓໙] ຕັ້ງແຕ່ເຮົາບວດມາແລ້ວ ໒໕ ພັນສາ
ຍັງບໍ່ຮູ້ສຶກວ່າໄດ້ຄວາມສະງົບຈິດໃນການໃດ ໆ ເລີຍ

[໔໐] ເຮົາບັງຄັບຈິດໃຫ້ຢູ່ໃນອຳນາດບໍ່ໄດ້ ຈຶ່ງບໍ່ໄດ້ຄວາມສະງົບຈິດ
ຍ້ອນເຫດນັ້ນ ເຮົາມາຣະນຶກເຖິງຄຳສອນຂອງພຣະຊິນນະເຈົ້າ
ຈຶ່ງໄດ້ເຖິງຄວາມສັງເວດ

[໔໑] ຖືກທຸກຫຼວງຫຼາຍກະທົບແລ້ວ ຈຶ່ງຍິນດີໃນຄວາມບໍ່ຜະໝາດ
ບັນລຸຄວາມສິ້ນຕັນຫາ ໄດ້ເຮັດຕາມຄຳສັ່ງສອນຂອງພຣະພຸດທະເຈົ້າແລ້ວ
ມື້ນີ້ເປັນຄືນທີ ໗ ນັບແຕ່ວັນທີ່ເຮົາເຮັດຕັນຫາໃຫ້ແຫ້ງສະນິດແລ້ວ

## ໒. ອຸດຕະມາເຖຣີຄາຖາ

### ພາສິດຂອງພຣະອຸດຕະມາເຖຣີ

ພຣະອຸດຕະມາເຖຣີ(ໄດ້ກ່າວພາສິດນີ້ວ່າ)

[໔໒] ເຮົາບັງຄັບຈິດໃຫ້ຢູ່ໃນອຳນາດບໍ່ໄດ້ ຈຶ່ງບໍ່ໄດ້ຄວາມສະງົບຈິດ
ຕ້ອງເຂົ້າອອກຈາກບ່ອນຢູ່ເຖິງ ໔-໕ ຄັ້ງ

[໔໓] ໄດ້ເຂົ້າໄປຫາພິກຂຸນີຜູ້ມີວາຈາທີ່ເຊື່ອຖືໄດ້
ທ່ານໄດ້ສະແດງທຳ ຄືຂັນ ອາຍະຕະນະ ແລະທາດແກ່ເຮົາ

[໔໔] ເຮົາຟັງທຳຂອງທ່ານແລ້ວໄດ້ປະຕິບັດຕາມທີ່ທ່ານພ່ຳສອນ
ເອີບອີ່ມດ້ວຍສຸກທີ່ເກີດແຕ່ປີຕິ
ນັ່ງຂັດສະມາທິທ່າດຽວຕະຫຼອດ ໗ ມື້
ໃນມື້ທີ ໘ ທຳລາຍກອງຄວາມມືດໄດ້ແລ້ວ ຈຶ່ງຢຽດຕີນອອກ

## ໓. ອຸປະຣາອຸດຕະມາເຖຣີຄາຖາ
## ພາສິດຂອງພຣະອຸປະຣາອຸດຕະມາເຖຣີ

ພຣະອຸປະຣາອຸດຕະມາເຖຣີ (ໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໔໕] ໂພດຊົງ ໗ ປະການເປັນທາງບັນລຸນິບພານນີ້
ເຮົາຈະເລີນແລ້ວທັງໝົດຕາມທີ່ພຣະພຸດທະເຈົ້າຊົງສະແດງໄວ້

[໔໖] ໄດ້ສູນຍະຕະສະມາບັດແລະອະນິມິດຕະສະມາບັດຢູ່ປະຈຳຕາມປາຖະໜາ
ເຮົາເປັນທິດາເຊິ່ງເກີດແຕ່ພຣະອຸຣະຂອງພຣະພຸດທະເຈົ້າ
ຍິນດີແລ້ວໃນນິບພານທຸກເມື່ອ

[໔໗] ກາມທັງປວງທັງທີ່ເປັນຂອງທິບແລະຂອງມະນຸດເຮົາກໍຕັດຂາດແລ້ວ
ການວຽນວ່າຍຕາຍເກີດສິ້ນໄປແລ້ວ
ບັດນີ້ບໍ່ມີການເກີດອີກ

## ໔. ທັນຕິກາເຖຣີຄາຖາ
## ພາສິດຂອງພຣະທັນຕິກາເຖຣີ

ພຣະທັນຕິກາເຖຣີ(ໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໔໘] ເຮົາອອກຈາກບ່ອນພັກກາງເວັນເທິງພູຄິດຊະກູດ
ໄດ້ເຫັນຊ້າງລົງສູ່ແມ່ນ້ຳແລ້ວ ຂຶ້ນທີ່ຝັ່ງແມ່ນ້ຳຈັນທະພາຄາ

[໔໙] ນາຍຄວານຊ້າງຖືຂໍແລ້ວ ຮ້ອງບອກວ່າ ຈົ່ງຢຽດຕີນອອກ
ຊ້າງຢຽດຕີນອອກແລ້ວ
ນາຍຄວານຊ້າງຈຶ່ງຂຶ້ນຂີ່ຊ້າງ

[໕໐] ເຮົາເຫັນຊ້າງທີ່ບໍ່ເຄີຍໄດ້ຮັບການເຝິກ
ເມື່ອໄດ້ຮັບການເຝິກແລ້ວ ຕົກຢູ່ໃນອຳນາດຂອງມະນຸດທັງຫຼາຍ
ພາຍຫຼັງແຕ່ໄດ້ເຫັນຊ້າງນັ້ນ ເຮົາຈຶ່ງເຂົ້າປ່າ
ເຮັດຈິດໃຫ້ເປັນສະມາທິຍ້ອນກິຣິຍາຊ້າງນັ້ນເປັນເຫດ

# ໕. ອຸບພິຣິເຖຣີຄາຖາ

## ພາສິດຂອງພຣະອຸບພິຣິເຖຣີ

(ພຣະສາດສະດາປະທັບນັ່ງໃນພຣະຄັນທະກຸດຕິ ສະແດງພຣະອົງແກ່ພຣະອຸບພິຣິເຖຣີ ໄດ້ ຕັດພຸດທະພາສິດນີ້ວ່າ)

[໕໑] ອຸບພິຣິທ່ານຮ່ຳໄຮຢູ່ໃນປ່າວ່າ ລູກຊີວາເອີຍ ດັ່ງນີ້
ທ່ານຈົ່ງຮູ້ສຶກຕົນກ່ອນເທີ້ນ
ບັນດາທິດາຂອງທ່ານທີ່ມີຊື່ຄືກັນວ່າ ຊີວາ
ຖືກເຜົາຢູ່ໃນປ່າຊ້ານີ້ທັງໝົດເຖິງ ໘໔,໐໐໐ ຄົນ
ທ່ານເສົ້າໂສກເຖິງທິດາຄົນໃດ

ພຣະອຸບພິຣິເຖຣີ (ບັນລຸພຣະອະຣະຫັດແລ້ວ ເມື່ອຈະຂາບທູນ ໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໕໘] ລູກສອນຄືຄວາມໂສກທີ່ເຫັນໄດ້ຍາກ ເຊິ່ງສຽບທີ່ຫະໄທຂ້າພຣະອົງ
ຂ້າພຣະອົງຖອນຂຶ້ນໄດ້ແລ້ວ ຍ້ອນພຣະອົງໄດ້ຊົງຊ່ອຍບັນເທົາຄວາມໂສກເຖິງທິດາຂອງຂ້າພຣະອົງເຊິ່ງຖືກຄວາມໂສກຄອບງຳ

[໕໓] ມື້ນີ້ ຂ້າພຣະອົງນັ້ນຖອນລູກສອນຄືຄວາມໂສກຂຶ້ນໄດ້ແລ້ວ
ໝົດຄວາມຢາກ ດັບຮອບແລ້ວ
ໄດ້ເຖິງມຸນີພຣະພຸດທະເຈົ້າ ພຣະທຳ ແລະພຣະສົງວ່າເປັນບ່ອນເພິ່ງບ່ອນຣະນຶກ

# ໖. ສຸກກາເຖຣີຄາຖາ

## ພາສິດຂອງພຣະສຸກກາເຖຣີ

ພຣະສຸກກາເຖຣີ(ໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໕໔] ພວກມະນຸດເມືອງຣາຊະຄືເຫຼົ່ານີ້ເຮັດຫຍັງກັນ

ມົວດື່ມນ້ຳເຜີ້ງ³ ດົດນີ້ວມີຢູ່ບໍ່ເຂົ້າໄປຫາພຣະສຸກາກາເຖຣີ
ຜູ້ກຳລັງສະແດງຄຳສັ່ງສອນຂອງພຣະພຸດທະເຈົ້າຢູ່ນໍ

[໕໕] ສ່ວນພວກຄົນທີ່ມີປັນຍາ
ເຂົ້າໃຈດື່ມພຣະທຳຄຳສອນຂອງພຣະພຸດທະເຈົ້ານັ້ນ
ເຊິ່ງເປັນທຳບໍ່ນຳກັບຫຼັງ
ເຮັດຜູ້ຟັງໃຫ້ຊຸ່ມຊື່ນ ມີໂອຊະ
ຄືບຸກຄົນເດີນທາງໄກດື່ມນ້ຳຝົນ

[໕໖] ພຣະສຸກາກາເຖຣີມີທຳບໍລິສຸດ
ປາສະຈາກຣາຄະ
ມີຈິດຕັ້ງໝັ້ນ ຊະນະມານພ້ອມທັງເສນາມານ
ຍັງຊົງຮ່າງກາຍທີ່ມີໃນພົບສຸດທ້າຍຢູ່

## ໗. ເສລາເຖຣີຄາຖາ

### ພາສິດຂອງພຣະເສລາເຖຣີ

(ມານກ່າວກັບພຣະເສລາເຖຣີວ່າ)

[໕໗] ນິບພານເປັນທີ່ສະລັດອອກບໍ່ມີໃນໂລກ
ທ່ານຈະເຮັດປະໂຫຍດອັນໃດດ້ວຍວິເວກນໍ
ເຊີນທ່ານບໍຣິໂພກຄວາມຍິນດີໃນກາມທັງຫຼາຍເທີ້ນ
ຢ່າໄດ້ເປັນຜູ້ມີຄວາມເດືອດຮ້ອນໃນພາຍຫຼັງເລີຍ
ພຣະເສລາເຖຣີ(ໂຕ້ຕອບມານດ້ວຍພາສິດເຫຼົ່ານີ້ວ່າ)

[໕໘] ກາມທັງຫຼາຍປຽບດ້ວຍຫອກແລະຫຼາວ
ເປັນຊຽງຮອງສັບຂັນທັງຫຼາຍ
ບັດນີ້ ເຮົາບໍ່ມີຄວາມຍິນດີໃນກາມທີ່ທ່ານເວົ້າເຖິງ

[໕໙] ເຮົາກຳຈັດຄວາມເພີດເພີນໃນກາມທັງປວງໄດ້ແລ້ວ
ທຳລາຍກອງແຫ່ງຄວາມມືດໄດ້ແລ້ວ
ມານຜູ້ຊົ່ວຊ້າເລວຊາມ ທ່ານຈົ່ງຮູ້ແນວນີ້
ທ່ານຖືກເຮົາກຳຈັດແລ້ວ

## ໘. ໂສມາເຖຣີຄາຖາ

### ພາສິດຂອງພຣະໂສມາເຖຣີ

(ມານກ່າວກັບພຣະໂສມາເຖຣີວ່າ)

[໖໐] ຖານະໃດອັນປະເສີດຢ່າງຍິ່ງ
ຄືພຣະອະຣະຫັດເຊິ່ງລືສີທັງຫຼາຍເພິ່ງບັນລຸ
ອັນບຸກຄົນເຫຼົ່າອື່ນໃຫ້ສຳເລັດໄດ້ຍາກ
ທ່ານເປັນແມ່ຍິງມີປັນຍາພຽງ ໒ ນິ້ວ[1]
ບໍ່ສາມາດຈະບັນລຸຖານະອັນນັ້ນໄດ້
ພຣະໂສມາເຖຣີ(ໂຕ້ຕອບມານດ້ວຍພາສິດເຫຼົ່ານີ້ວ່າ)

[໖໑] ເມື່ອຈິດຕັ້ງໝັ້ນດີ
ເມື່ອຍານເປັນໄປຢູ່
ເມື່ອເຫັນແຈ້ງທຳໂດຍຖືກຕ້ອງ
ຄວາມເປັນແມ່ຍິງຈະເຮັດຫຍັງເຮົາໄດ້

[໖໒] ເຮົາກຳຈັດຄວາມເພີດເພີນໃນກາມທັງປວງໄດ້ແລ້ວ
ທຳລາຍກອງແຫ່ງຄວາມມືດໄດ້ແລ້ວ
ມານຜູ້ຊົ່ວຊ້າເລວຊາມ ທ່ານຈົ່ງຮູ້ແນວນີ້
ທ່ານຖືກເຮົາກຳຈັດແລ້ວ

**ຕິກະນິບາດ ຈົບ**

# ໔. ຈະຕຸກກະນິບາດ

## ໑. ພັດທະກາປິລານີເຖຣີຄາຖາ

### ພາສິດຂອງພຣະພັດທະກາປິລານີເຖຣີ

ພຣະພັດທະກາປິລານີເຖຣີ (ໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໖໓] ພຣະມະຫາກັດສະປະເຖຣະເປັນບຸດ

ເປັນທາຍາດຂອງພຣະພຸດທະເຈົ້າ
ມີຈິດຕັ້ງໝັ້ນດີແລ້ວ
ທ່ານຣະນຶກຊາດໄດ້ ທັງເຫັນສະຫວັນແລະອະບາຍ

[໖໔] ອັນໜຶ່ງ ທ່ານເຖິງຄວາມສິ້ນຊາດ
ເປັນຜູ້ສຳເລັດກິດແລ້ວ ຍ້ອນຮູ້ຍິ່ງ ເປັນມຸນີ
ເປັນພາມຜູ້ໄດ້ວິດຊາ ໓ ດ້ວຍວິດຊາ ໓ ເຫຼົ່ານີ້

[໖໕] ພຣະພັດທະກາປິລານີເຖຣີກໍໄດ້ວິດຊາ ໓ ຄືພຣະມະຫາກັດສະປະ
ລະມັດຈຸຣາດໄດ້
ຊະນະມານພ້ອມທັງເສນາມານໄດ້ແລ້ວ
ຍັງຊົງຮ່າງກາຍທີ່ມີໃນພົບສຸດທ້າຍຢູ່

[໖໖] ເຮົາທັງ ໒ ເຫັນໂທດທາງໂລກ ແລ້ວອອກບວດ
ເຝິກຝົນຕົນ ສິ້ນອາສະວະ
ເປັນຜູ້ເຢັນ ດັບດີແລ້ວ

**ຈະຕຸກກະນິບາດ ຈົບ**

# ໕. ປັນຈະກະນິບາດ

## ໑. ອັນຍະກາເຖຣີຄາຖາ

### ພາສິດຂອງພຣະອັນຍະກາເຖຣີ

ພຣະເຖຣີອົງໜຶ່ງ (ໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໖໗] ຕັ້ງແຕ່ເຮົາບວດມາຕະຫຼອດ ໒໕ ພັນສາ ຍັງບໍ່ປະສົບຄວາມສະງົບຈິດ
ແມ່ນຊົ່ວເວລາພຽງດີດນິ້ວມືດຽວເລີຍ

[໖໘] ເຮົາບໍ່ໄດ້ຄວາມສະງົບຈິດ ມີຈິດຊຸ່ມດ້ວຍກາມຣາຄະ
ຍ່າງປະຄອງແຂນຮ່ຳໄຮເຂົ້າໄປສູ່ວິຫານ

[໖໙] ໄດ້ເຂົ້າໄປຫາພິກຂຸນີຜູ້ມີວາຈາທີ່ເຊື່ອຖືໄດ້
ທ່ານໄດ້ສະແດງທຳ ຄື ຂັນ ອາຍະຕະນະ ແລະທາດແກ່ເຮົາ

[໗໐] ເຮົາຟັງທຳຂອງທ່ານແລ້ວ ເຂົ້າໄປນັ່ງຢູ່ບ່ອນທີ່ສົມຄວນ
ຣະນຶກຊາດໄດ້ ຊຳຣະທິບພະຈັກຂຸໃຫ້ບົດຈົດແລ້ວ

[໗໑] ເຮົາຊຳຣະເຈໂຕປະຣິຍະຍານແລະໂສຕະທາດໃຫ້ບົດຈົດແລ້ວ
ແມ່ນລິດເຮົາກໍເຮັດໃຫ້ແຈ້ງແລ້ວ ທຳເປັນທີ່ສິ້ນສຸດອາສະວະເຮົາກໍບັນລຸແລ້ວ
ອະພິນຍາ ໖ ເຮົາກໍເຮັດໃຫ້ແຈ້ງແລ້ວ
ເຮົາໄດ້ເຮັດຕາມຄຳສັ່ງສອນຂອງພຣະພຸດທະເຈົ້າແລ້ວ

## ໔. ວິມະລາເຖຣີຄາຖາ

## ພາສິດຂອງພຣະວິມະລາເຖຣີ

ພຣະວິມະລາເຖຣີຜູ້ເຄີຍເປັນຍິງຄະນິກາ[໑] (ໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໗໒] ເຮົາມົວເມົາດ້ວຍຜິວພັນ ຮູບສົມບັດ ຄວາມສວຍງາມ ບໍລິວານຍົດ
ແລະເປັນຜູ້ມີຈິດກະດ້າງຢ່າງຍິ່ງ ດ້ວຍຄວາມເປັນສາວ ດູໝິ່ນຍິງອື່ນ

[໗໓] ປະດັບຮ່າງກາຍນີ້ໃຫ້ວິຈິດງົດງາມສຳລັບລວງຊາຍໂງ່
ໄດ້ຢືນຢູ່ທີ່ປະຕູເຮືອນຍິງແພດສະຫຍາ
ຄືນາຍພານເນື້ອວາງບ້ວງດັກເນື້ອໄວ້

[໗໔] ເຮົາອວດເຄື່ອງປະດັບຕ່າງ ໆ ຫຼວງຫຼາຍ
ແລະອວດອະໄວຍະວະທີ່ຄວນປົກປິດໃຫ້ຜາກົດ
ກະຊິກກະຊີ້ ໄດ້ເຮັດມາຍາຫຼາຍແນວໃຫ້ຊາຍຈຳນວນຫຼາຍລຸ້ມຫຼົງ

[໗໕] ມື້ນີ້ ເຮົານັ້ນແຖຜົມທົ່ມຜ້າສັງຄາຕິ ບວດ ທ່ຽວບິນທະບາດ
ແລ້ວມານັ່ງຢູ່ທີ່ເຫງົ້າຕົ້ນໄມ້ ໄດ້ຊານທີ່ບໍ່ມີວິຕົກ[໑]

[໗໖] ໄດ້ຕັດກິເລດເປັນເຫດເກາະກ່ຽວ
ທັງທີ່ເປັນຂອງທິບແລະຂອງມະນຸດໄດ້ທັງໝົດ
ເຮັດອາສະວະທັງປວງໃຫ້ສິ້ນໄປ ເປັນຜູ້ເຢັນ ດັບດີແລ້ວ

## ໖. ສີຫາເຖຣີຄາຖາ

## ພາສິດຂອງພຣະສີຫາເຖຣີ

ພຣະສີຫາເຖຣີ (ໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໗໗] ແຕ່ກ່ອນ ເຮົາໄດ້ຖືກການຣາຄະບຽດບຽນ ມີຈິດຟຸ້ງຊ່ານ
ບັງຄັບຈິດໃຫ້ຢູ່ໃນອຳນາດບໍ່ໄດ້ ຍ້ອນບໍ່ເຮັດໄວ້ໃນໃຈໂດຍແຍບຄາຍ

[໗໘] ຖືກກິເລດກຸ້ມລຸມ ມັກເຂົ້າໃຈການວ່າສວຍງາມ
ຕົກຢູ່ໃນອຳນາດຣາຄະ ຈຶ່ງບໍ່ໄດ້ຄວາມສະຫງົບຈິດ

[໗໙] ຈ່ອຍເຫຼືອງ ແລະມີຜິວພັນບໍ່ຜ່ອງໃສ
ປະພຶດ(ພົມມະຈັນ)ຢູ່ ໗ ປີ ມີແຕ່ທຸກ
ບໍ່ໄດ້ຄວາມສຸກທັງກາງເວັນແລະກາງຄືນ

[໘໐] ຍ້ອນເຫດນັ້ນ ເຮົາຈຶ່ງຖືເຊືອກເຂົ້າໄປສູ່ປ່າ ດ້ວຍຄິດວ່າ
ຈະຜູກຄໍຕາຍສາໃນບ່ອນນີ້ ດີກວ່າທີ່ຈະກັບໄປເປັນຄະລືຫັດອີກ

[໘໑] ຈຶ່ງເຮັດບ້ວງໃຫ້ໝັ້ນ ມັດທີ່ງ່າໄມ້ ແລ້ວໃສ່ບ້ວງທີ່ຄໍ
ທັນໃດນັ້ນ ຈິດຂອງເຮົາກໍລຸດພົ້ນຈາກກິເລດ

## ໔. ສຸນທະຣີນັນທາເຖຣີຄາຖາ

### ພາສິດຂອງພຣະສຸນທະຣີນັນທາເຖຣີ

(ພຣະສາດສະດາເມື່ອຈະຊົງສະແດງທຳໃຫ້ເໝາະແກ່ພຣະສຸນທະຣີນັນທາເຖຣີ ຈຶ່ງໄດ້ຕັດພຣະພຸດທະພາສິດເຫຼົ່ານີ້ວ່າ)

[໘໒] ນັນທາ ທ່ານຈົ່ງພິຈາລະນາເບິ່ງຮ່າງກາຍເຊິ່ງກະສັບກະສ່າຍ
ບໍ່ສະອາດ ເປັນຂອງເປື່ອຍເນົ່າ
ຈົ່ງອົບຮົມຈິດໃຫ້ຕັ້ງໝັ້ນດີ ມີອາລົມດຽວ ດ້ວຍອະສຸພະພາວະນາ

[໘໓] ຮ່າງກາຍແມ່ຍິງທີ່ເນຣະມິດຂຶ້ນນີ້ ສັນໃດ
ຮ່າງກາຍຂອງທ່ານນັ້ນ ກໍສັນນັ້ນ
ຮ່າງກາຍຂອງທ່ານນັ້ນ ສັນໃດ
ຮ່າງກາຍແມ່ຍິງທີ່ເນຣະມິດຂຶ້ນນີ້ ກໍສັນນັ້ນ
ຮ່າງກາຍເປັນຂອງເປື່ອຍເນົ່າ ມີກິ່ນເໝັນຟຸ້ງໄປ
ທີ່ພວກຄົນຈົນເພີດເພີນກັນຢ່າງຍິ່ງ

[໘໔] ເມື່ອທ່ານພິຈາລະນາຮ່າງກາຍນັ້ນແນວນີ້

ບໍ່ຊີ້ຄ້ານທັງກາງເວັນແລະກາງຄືນ
ແຕ່ນັ້ນ ຈະເຫັນແຈ້ງດ້ວຍປັນຍາຂອງຕົນເອງໄດ້

(ພຣະສຸບທະຣິເຖຣີບັນລຸພຣະອະຣະຫັດແລ້ວໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໗໕] ເມື່ອເຮົານັ້ນບໍ່ຜະໝາດ
ຄົ້ນຄວ້າຢູ່ໂດຍແຍບຄາຍ
ໄດ້ເຫັນຮ່າງກາຍນີ້ທັງພາຍໃນແລະພາຍນອກຕາມຄວາມເປັນຈິງ

[໗໖] ບັດນັ້ນ ເຮົາຈຶ່ງເບື່ອໜ່າຍໃນຮ່າງກາຍ
ແລະຄາຍຄວາມກຳໜັດໃນພາຍໃນ
ບໍ່ຜະໝາດ ບໍ່ເກາະກ່ຽວໃນສິ່ງອັນໃດ ໆ
ເປັນຜູ້ສະງົບລະງັບ ດັບເຢັນແລ້ວ

## ໕. ນັນທຸດຕະຣາເຖຣີຄາຖາ

### ພາສິດຂອງພຣະນັນທຸດຕະຣາເຖຣີ

ພຣະນັນທຸດຕະຣາເຖຣີ(ໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໗໗] ເຮົາບູຊາໄຟ ໄຫວ້ດວງຈັນ
ດວງອາທິດ ແລະເທວະດາ
ໄປສູ່ທ່ານ້ຳແລ້ວລົງດຳນ້ຳ

[໗໘] ສະມາທານຂໍ້ວັດປະຕິບັດຫຼວງຫຼາຍ
ແຖຫົວເຄິ່ງໜຶ່ງ ນອນເທິງແຜ່ນດິນ
ບໍ່ບໍຣິໂພກອາຫານໃນເວລາກາງຄືນ

[໗໙] ແຕ່ຍັງຍິນດີການປະດັບຕົກແຕ່ງ
ບຳລຸງຮ່າງກາຍນີ້ດ້ວຍການອາບນ້ຳແລະຂັດສີ
ຖືກກາມຣາຄະຄອບງຳແລ້ວ

[໘໐] ຕໍ່ມາ ໄດ້ສັດທາ ບວດເປັນບັນພະຊິດ
ເຫັນຮ່າງກາຍຕາມຄວາມເປັນຈິງ
ຈຶ່ງຖອນກາມຣາຄະໄດ້

[໔໑] ຕັດພົບ ຄວາມຢາກ ແລະຄວາມປາຖະໜາໄດ້ທັງໝົດ
ບໍ່ເກາະກ່ຽວດ້ວຍກິເລດເຄື່ອງມັດທຸກຢ່າງ
ບັນລຸຄວາມສະງົບໃຈແລ້ວ

## ໖. ມິດຕາກາລີເຖຣີຄາຖາ

### ພາສິດຂອງພຣະມິດຕາກາລີເຖຣີ

ພຣະມິດຕາກາລີເຖຣີ(ໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໔໘] ເຮົາອອກຈາກເຮືອນບວດເປັນບັນພະຊິດດ້ວຍສັດທາ
ແຕ່ເປັນຜູ້ຂົນຂວາຍໃນລາບສັກກາຣະທ່ຽວໄປດ້ວຍເຫດນັ້ນ ໆ

[໔໗] ລະຖິ້ມປະໂຫຍດທີ່ຍອດຢ້ຽມ ຖືເອົາປະໂຫຍດທີ່ຊົ່ວ
ຕົກຢູ່ໃນອຳນາດຂອງກິເລດ
ບໍ່ຍິນດີປະໂຫຍດຂອງຄວາມເປັນສະມະນະ

[໔໘] ເມື່ອເຮົານັ້ນນັ່ງໃນບ່ອນຢູ່ ໄດ້ເກີດຄວາມສັງເວດວ່າ
ເຮົາເດີນທາງຜິດສາແລ້ວ ຕົກຢູ່ໃນອຳນາດຂອງຕັນຫາ

[໔໕] ຊີວິດຂອງເຮົາໜ້ອຍ ຊະຣາແລະພະຍາທິຍ່ຳຍີ
ຮ່າງກາຍນີ້ຈະແຕກສະຫຼາຍໄປສາກ່ອນ
ບໍ່ແມ່ນເວລາທີ່ເຮົາຈະຜະໝາດ

[໔໖] ເມື່ອເຮົາພິຈາລະນາເຖິງຄວາມເກີດຂຶ້ນ
ແລະຄວາມເສື່ອມໄປຂອງຂັນທັງຫຼາຍຕາມຄວາມເປັນຈິງ
ຈຶ່ງໄດ້ດຳລົງຢູ່ຢ່າງຜູ້ມີຈິດລຸດພົ້ນ
ເຮົາໄດ້ເຮັດຕາມຄຳສັ່ງສອນຂອງພຣະພຸດທະເຈົ້າແລ້ວ

## ໗. ສະກຸລາເຖຣີຄາຖາ

### ພາສິດຂອງພຣະສະກຸລາເຖຣີ

ພຣະສະກຸລາເຖຣີ(ໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໔໗] ເມື່ອເຮົາຍັງຢູ່ໃນເຮືອນ ຟັງທຳຂອງພິກຂຸແລ້ວ

ໄດ້ເຫັນນິບພານເຊິ່ງເປັນທຳປາສະຈາກກິເລດຄືທຸລີ
ເປັນທາງເຖິງຄວາມສຸກ ບໍ່ຈຸຕິ

[໙໗] ເຮົານັ້ນລະບຸດທິດາ ຊັບ ແລະເຂົ້າເປືອກ
ແຖຜົມແລ້ວບວດເປັນບັນພະຊິດ

[໙໙] ເປັນສິກຂະມານາຢູ່ ຈະເລີນມັກເບື້ອງສູງ ຈຶ່ງລະຣາຄະ ໂທສະ
ແລະອາສະວະທັງຫຼາຍທີ່ປະກອບດ້ວຍຣາຄະແລະໂທສະນັ້ນໄດ້

[໑໐໐] ອຸປະສົມບົດເປັນພິກຂຸນີແລ້ວ ຣະນຶກຊາດກ່ອນໄດ້
ຊຳຣະທິບພະຈັກຂຸທີ່ອົບຮົມແລ້ວຢ່າງດີໃຫ້ໝົດມົນທິນໄດ້

[໑໐໑] ເຫັນສັງຂານທັງຫຼາຍເປັນອະນັດຕາອັນເກີດແຕ່ເຫດ
ມີສະພາວະຊຸດໂຊມໂດຍຄວາມເປັນອະນັດຕາແລ້ວລະອາສະວະທັງປວງໄດ້
ຈຶ່ງເປັນຜູ້ເຢັນດັບດີແລ້ວ

## ໗. ໂສນາເຖຣີຄາຖາ

### ພາສິດຂອງພຣະໂສນາເຖຣີ

ພຣະໂສນາເຖຣີ(ໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໑໐໒] ໃນເຮືອນຮ່າງຄືຮູບນີ້ ເຮົາເກີດລູກ ໑໐ ຄົນ
ຍ້ອນເຫດນັ້ນ ຈຶ່ງຊຸດໂຊມແກ່ໄປ ໄດ້ເຂົ້າໄປຫາພິກຂຸນີ

[໑໐໓] ພິກຂຸນີນັ້ນສະແດງທຳ ຄື ຂັນ ອາຍະຕະນະ ແລະທາດແກ່ເຮົາ
ເຮົາຟັງທຳຂອງທ່ານແລ້ວກໍແຖຜົມບວດ

[໑໐໔] ເມື່ອເຮົາສຶກສາຢູ່ ກໍຊຳຣະທິບພະຈັກຂຸໃຫ້ມົດຈົດ
ຣະນຶກເຖິງຊາດກ່ອນທີ່ເຮົາເຄີຍຢູ່ອາໄສມາ

[໑໐໕] ແລະຈະເລີນອະນິມິດຕະສະມາທິ[๑] ມີຈິດຕັ້ງໝັ້ນດີ ມີອາລົມດຽວ
ມີວິໂມກ ໔ ເກີດຂຶ້ນໃນລຳດັບ ບໍ່ຢຶດໝັ້ນ ດັບເຢັນແລ້ວ

[໑໐໖] ຂັນ ໕ ທີ່ເຮົາກຳນົດຮູ້ແລ້ວ
ມີຮາກອັນຂາດແລ້ວ ຄົງຢູ່

ສິ່ງທີ່ຍັງຄົງຢູ່ ກໍຄົງມີຢູ່ໃນກາຍທີ່ຊຸດໂຊມ ຊົ່ວຊາມ
ບັດນີ້ບໍ່ມີຄວາມເກີດອີກ

## ໙. ພັດທາກຸນທົນເກສາເຖຣີຄາຖາ
## ພາສິດຂອງພຣະພັດທາກຸນທົນເກສາເຖຣີ

(ພຣະພັດທາກຸນທົນເກສາເຖຣີໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໑໐໗] ແຕ່ກ່ອນເຮົາລົກຜົມ ອົມຂີ້ແຂ້ວ
ມີຜ້າຜືນດຽວ ທ່ຽວໄປ
ສຳຄັນໃນສິ່ງທີ່ບໍ່ມີໂທດວ່າມີໂທດ
ແລະເຫັນໃນສິ່ງທີ່ມີໂທດວ່າບໍ່ມີໂທດ
[໑໐໘] ເຮົາຈາກທີ່ພັກກາງເວັນເທິງພູຄິຊະກູດ
ໄດ້ເຫັນພຣະພຸດທະເຈົ້າຜູ້ປາສະຈາກກິເລດ
ຫ້ອມລ້ອມດ້ວຍໝູ່ພິກຂຸ
[໑໐໙] ຈຶ່ງຄຸກເຂົ່າຖວາຍບັງຄົມ ທຳອັນຊະລີເບື້ອງພຣະພັກ
ພຣະອົງໄດ້ຕັດວ່າ ມາເທີ້ນ ພັດທາ
ພຣະດຳຣັດນັ້ນ ເຮັດໃຫ້ເຮົາໄດ້ອຸປະສົມບົດແລ້ວ
[໑໑໐] ແຕ່ກ່ອນ ເຮົາບໍຣິໂພກກ້ອນເຂົ້າຂອງຊາວແວ່ນແຄວ້ນທີ່ເປັນໜີ້
ຈາຣິກໄປທົ່ວແຄວ້ນອັງຄະ ມະຄົດ ວັດຊີ ກາສີ ແລະໂກສົນ
ຕັ້ງແຕ່ພົບພຣະສາດສະດາ
ເຮົາບໍຣິໂພກກ້ອນເຂົ້າຂອງຊາວແວ່ນແຄວ້ນທີ່ບໍ່ເປັນໜີ້ມາ ໕໐ ປີແລ້ວ
[໑໑໑] ກໍອຸປາສົກທີ່ໄດ້ຖວາຍຈີວອນແກ່ເຮົາຜູ້ຊື່ວ່າພັດທາ
ເຊິ່ງພົ້ນຈາກກິເລດທີ່ຮ້ອຍຮັດທຸກຢ່າງ
ເປັນຄົນມີປັນຍາ ໄດ້ປະສົບບຸນຫຼວງຫຼາຍ

## ໑໐. ປະຕາຈາຣາເຖຣີຄາຖາ
## ພາສິດຂອງພຣະປະຕາຈາຣາເຖຣີ

(ພຣະປະຕາຈາຣາເຖຣີໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໑໑໒] ມານົບທັງຫຼາຍໃຊ້ໄຖ ໄຖນາ ຫວ່ານເມັດພືດລົງເທິງແຜ່ນດິນ
ໄດ້ຊັບມາລ້ຽງລູກແລະພັນລະຍາ

[໑໑໓] ເຮົາມີສິນສົມບູນ ເຮັດຕາມຄຳສັ່ງສອນຂອງພຣະສາດສະດາ
ບໍ່ຂີ້ຄ້ານ ບໍ່ຟຸ້ງຊ່ານ ເປັນຫຍັງຈະບໍ່ບັນລຸນິບພານນໍ

[໑໑໔] ເຮົາລ້າງຕີນ ເຫັນນ້ຳລ້າງຕີນໄຫຼຈາກບ່ອນໂນນມາສູ່ບ່ອນຫຼຸບ
ໃສ່ໃຈນິມິດໃນນ້ຳ

[໑໑໕] ແຕ່ນັ້ນ ເຮົາຕັ້ງໃຈໄວ້ໝັ້ນຄົງ ຄືມ້າອາຊາໄນທີ່ດີ
ລຳດັບນັ້ນ ຖືປະທີບເຂົ້າໄປສູ່ວິຫານ ກວດເບິ່ງບ່ອນນອນ ຂຶ້ນນັ່ງເທິງຕຽງ

[໑໑໖] ຕໍ່ແຕ່ນັ້ນ ຖືລູກກະແຈ(ອັດປະຕູໃສ່ໄລ) ໝຸນໄສ້ປະທີບລົງ
ຄວາມລຸດພົ້ນທາງໃຈກໍໄດ້ມີແລ້ວ
ຄືປະທີບລຸກສະຫວ່າງແຈ້ງແລ້ວດັບລົງ

## ໑໑. ຕິງສະມັດຕາເຖຣີຄາຖາ
## ພາສິດຂອງພຣະຕິງສະມັດຕາເຖຣີ

ຮູ້ວ່າ ພຣະເຖຣີປະມານ ໓໐ ອົງນີ້ ໄດ້ພະຍາກອນອະຣະຫັດຕະຜົນໃນສຳນັກພຣະປະຕາຈາຣາເຖຣີແນວນີ້ວ່າ

[໑໑໗] ມານົບທັງຫຼາຍຖືສາກຕຳເຂົ້າ
ໄດ້ຊັບມາລ້ຽງລູກແລະພັນລະຍາ

[໑໑໘] ທ່ານທັງຫຼາຍຈົ່ງເຮັດຕາມຄຳສັ່ງສອນຂອງພຣະພຸດທະເຈົ້າ
ທີ່ບຸກຄົນກະທຳແລ້ວບໍ່ເດືອດຮ້ອນໃນພາຍຫຼັງ
ຈົ່ງຟ້າວລ້າງຕີນ ແລ້ວນັ່ງຢູ່ບ່ອນທີ່ສົມຄວນເທີ້ນ
ຈົ່ງປະກອບຄວາມສະງົບໃຈເນືອງ ໆ
ກະທຳຕາມຄຳສັ່ງສອນຂອງພຣະພຸດທະເຈົ້າເທີ້ນ

[໑໑໙] ພິກຂຸນີເຫຼົ່ານັ້ນຟັງຄຳສັ່ງສອນຂອງປະຕາຈາຣາເຖຣີນັ້ນແລ້ວ
ລ້າງຕີນເຂົ້າໄປນັ່ງຢູ່ບ່ອນທີ່ສົມຄວນ ໄດ້ປະກອບຄວາມສະງົບໃຈເນືອງ ໆ
ກະທຳຕາມຄຳສອນຂອງພຣະພຸດທະເຈົ້າ

[໑໒໐] ໃນປະຖົມມະຍາມແຫ່ງຣາຕີ ພາກັນຣະນຶກຊາດກ່ອນໄດ້
ໃນມັດຊິມະຍາມແຫ່ງຣາຕີ ຊຳຣະທິບພະຈັກຂຸໃຫ້ມົດຈົດໄດ້
ໃນປັດສິມມະຍາມແຫ່ງຣາຕີ ທຳລາຍກອງແຫ່ງຄວາມມືດໄດ້

[໑໔໑] ພິກຂຸນີເຫຼົ່ານັ້ນ ພາກັນລຸກຂຶ້ນຂາບຕີນພຣະເຖຣີພ້ອມກັບກ່າວວ່າ
ພວກເຮົາເຮັດຕາມຄຳສອນຂອງທ່ານແລ້ວ ຈະຢູ່ຫ້ອມລ້ອມທ່ານ
ຄືເທວະດາຊັ້ນຕາວະຕິງສາຫ້ອມລ້ອມທ້າວສັກກະຜູ້ຊະນະໃນສົງຄາມ
ພວກເຮົາໄດ້ບັນລຸວິດຊາ ໓ ແລ້ວ ເປັນຜູ້ບໍ່ມີອາສະວະ

## ໑໔. ຈັນທາເຖຣີຄາຖາ

## ພາສິດຂອງພຣະຈັນທາເຖຣີ

ພຣະຈັນທາເຖຣີ(ໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໑໔໒] ແຕ່ກ່ອນ ເຮົາເປັນຄົນເຂັນໃຈ ແລະເປັນແມ່ໝ້າຍບໍ່ມີບຸດ
ປາສະຈາກຍາດມິດ ບໍ່ໄດ້ຄວາມບໍລິບູນດ້ວຍອາຫານແລະຜ້າ

[໑໔໓] ຖືພາຊະນະແລະໄມ້ການເທົ້າ ທ່ຽວຂໍທານຈາກຕະກູນໜຶ່ງໄປສູ່ຕະກູນໜຶ່ງ
ຖືກຄວາມໜາວແລະຄວາມຮ້ອນບຽດບຽນ ທ່ຽວຂໍທານຢູ່ເຖິງ ໗ ປີ

[໑໔໔] ຕໍ່ມາພາຍຫຼັງ ໄດ້ພົບປະຕາຈາຣາພິກຂຸນີ
ຜູ້ໄດ້ເຂົ້າແລະນ້ຳຢູ່ເປັນປະຈຳ
ຈຶ່ງເຂົ້າໄປຂໍບວດເປັນບັນພະຊິດ

[໑໔໕] ແລະພຣະປະຕາຈາຣາພິກຂຸນີນັ້ນກໍໄດ້ກະລຸນາບວດໃຫ້ເຮົາ
ຕໍ່ມາທ່ານກໍສັ່ງສອນເຮົາໃຫ້ປະກອບໃນປະໂຫຍດຢ່າງຍິ່ງ

[໑໔໖] ເຮົາຟັງຄຳຂອງທ່ານແລ້ວໄດ້ເຮັດຕາມຄຳສອນ
ໂອວາດຂອງພຣະແມ່ເຈົ້າບໍ່ເປັນໂມຄະ
ເຮົາໄດ້ບັນລຸວິດຊາ ໓ ແລ້ວ ເປັນຜູ້ບໍ່ມີອາສະວະ

**ປັນຈະກະນິບາດ ຈົບ**

# ໖. ສັກກະນິບາດ

## ໑. ປັນຈະສະຕະມັດຕາເຖຣີຄາຖາ

ພາສິດຂອງພຣະປັນຈະສະຕະມັດຕາເຖຣີ

(ພຣະປະຕາຈາຣາເຖຣີກ່າວອົບຮົມພຣະເຖຣີ ໕໐໐ ອົງ ເທື່ອລະອົງວ່າ)

[໑໘໗] ທ່ານບໍ່ຮູ້ທາງຂອງສັດໃດຜູ້ມາແລ້ວຫຼືໄປແລ້ວ
ເປັນຫຍັງ ທ່ານຈຶ່ງຮ້ອງໄຫ້ເຖິງສັດທີ່ມາແລ້ວນັ້ນວ່າ ບຸດຂອງເຮົາ

[໑໘໘] ເຖິງທ່ານຈະຮູ້ທາງຂອງເຂົາຜູ້ມາແລ້ວຫຼືໄປແລ້ວ
ກໍບໍ່ຄວນເສົ້າໂສກເຖິງເຂົາເລີຍ
ຍ້ອນວ່າສັດທັງຫຼາຍຍ່ອມມີແນວນີ້ເປັນທຳມະດາ

[໑໘໙] ສັດຜູ້ໃຜ ໆ ບໍ່ໄດ້ເຊື້ອເຊີນກໍມາຈາກປະຣະໂລກນັ້ນ
ໃຜ ໆ ຍັງບໍ່ໄດ້ອະນຸຍາດກໍໄປຈາກໂລກນີ້
ເຂົາມາຈາກບ່ອນໃດກັນແນ່ນໍ ຢູ່ໄດ້ ໔-໕ ມື້
ແລ້ວກໍໄປຈາກພົບນີ້ສູ່ພົບອື່ນກໍມີ ຈາກພົບນັ້ນໄປສູ່ພົບອື່ນກໍມີ

[໑໙໐] ເຂົາລະໄປແລ້ວ ຈະທ່ອງທ່ຽວໄປໂດຍຮູບຮ່າງຂອງມະນຸດ
ເຂົາມາແນວໃດ ກໍໄປແນວນັ້ນ
ຍ້ອນເຫດນັ້ນຈະຮ້ອງໄຫ້ໄປເຮັດຫຍັງ

(ພຣະເຖຣີປະມານ ໕໐໐ ອົງ ກ່າວເທື່ອລະອົງດ້ວຍພາສິດເຫຼົ່ານີ້ວ່າ)

[໑໙໑] ທ່ານໄດ້ບັນເທົາຄວາມໂສກເຖິງບຸດຂອງເຮົາເຊິ່ງຖືກຄວາມໂສກຄອບງຳ
ນັບວ່າໄດ້ຊ່ອຍຖອນລູກສອນຄືຄວາມໂສກທີ່ເຫັນໄດ້ຍາກ
ເຊິ່ງສຽບທີ່ຫະໄທຂອງເຮົາຂຶ້ນແລ້ວນໍ

[໑໙໒] ມື້ນີ້ ເຮົາຊ່ອຍຖອນລູກສອນຄືຄວາມໂສກຂຶ້ນໄດ້ແລ້ວ
ຫາຍຍາກ ດັບເຢັນແລ້ວ
ຂໍເຖິງພຣະມຸນີພຸດທະເຈົ້າ ພຣະທຳ ແລະພຣະສົງວ່າເປັນບ່ອນເພິ່ງບ່ອນຣະນຶກ

# ໘. ວາສິດຖີເຖຣີຄາຖາ

## ພາສິດຂອງພຣະວາສິດຖີເຖຣີ

ພຣະວາສິດຖີເຖຣີ(ໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໑໙໓] ເຮົາກະທົບກະເທືອນໃຈຍ້ອນຄວາມໂສກເສົ້າເຖິງບຸດ
ມີຈິດຟຸ້ງຊ່ານ ບໍ່ຮູ້ສຶກໂຕ
ເປືອຍກາຍແລະມີຜົມຫຍຸ້ງຫຍອງ ທ່ຽວຮ້ອງໄຫ້ໄປຕາມທີ່ຕ່າງ ໆ

[໑໓໔] ໄດ້ທ່ຽວໄປຕາມຖະໜົນ ກອງຂີ້ເຫຍື້ອ ໃນປ່າຊ້າ
ໃນຮ່ອມໃຫຍ່ຮ່ອມນ້ອຍ ອົດ ໆ ຍາກ ໆ ເຖິງ ໓ ປີ

[໑໓໕] ພາຍຫຼັງ ໄດ້ພົບພຣະສຸຄົດເຈົ້າຜູ້ເຝິກຄົນທີ່ຍັງບໍ່ໄດ້ເຝິກ
ຕັດສະຣູ້ດ້ວຍພຣະອົງເອງ
ບໍ່ເກີດຄວາມຢ້ານແຕ່ບ່ອນໃດ ໆ ກຳລັງສະເດັດໄປສູ່ນະຄອນມິຖິລາ

[໑໓໖] ກັບໄດ້ສະຕິແລ້ວເຂົ້າໄປຖວາຍບັງຄົມ
ພຣະໂຄດົມພຣະອົງນັ້ນ ໄດ້ຊົງພຣະກະລຸນາສະແດງທຳໂຜດເຮົາ

[໑໓໗] ເຮົາຟັງທຳຂອງພຣະອົງແລ້ວບວດເປັນບັນພະຊິດ
ພຽນພະຍາຍາມໃນຄຳສອນຂອງພຣະສາດສະດາ
ໄດ້ເຮັດໃຫ້ແຈ້ງເຊິ່ງບົດທຳອັນປອດໂປ່ງ

[໑໓໘] ຖອນແລະລະຄວາມໂສກທັງໝົດໄດ້ແລ້ວ
ຍ້ອນເຮົາກຳນົດຮູ້ວັດຖຸຄືອຸປາທານຂັນ ໕
ເຊິ່ງເປັນເຫດເກີດແຫ່ງຄວາມໂສກທັງຫຼາຍໄດ້

## ໓. ເຂມາເຖຣີຄາຖາ

### ພາສິດຂອງພຣະເຂມາເຖຣີ

(ມານໃຈບາບເມື່ອຈະປະເລົ້າປະໂລມະພຣະເຖຣີດ້ວຍການມະຖຸນ ຈຶ່ງໄດ້ກ່າວພາສິດນີ້ວ່າ)

[໑໓໙] ທ່ານຍັງເປັນສາວ ມີຮູບງາມ ເຖິງເຮົາກໍຍັງໜຸ່ມລຸ້ນ
ມາເທີ້ນ ເຂມາ ເຮົາມາຮ່ວມອະພິຣົມກັນດ້ວຍດົນຕີເຄື່ອງ ໕ ເທີ້ນ

ພຣະເຂມາເຖຣີ (ເມື່ອຈະປະກາດຄວາມບໍ່ຍິນດີຂອງຕົນຈຶ່ງໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໑໔໐] ເຮົາອຶດອັດເອືອມຣະອາດ້ວຍກາຍທີ່ເປື່ອຍເນົ່າ ກະສັບກະສ່າຍ
ເຊິ່ງມີອັນຈະແຕກພັງໄປເປັນທຳມະດານີ້ຢູ່
ເຮົາຖອນການຕັນຫາໄດ້ແລ້ວ

[໑໔໑] ການທັງຫຼາຍປຽບດ້ວຍຫອກແລະຫຼາວ
ເປັນຂຽງຮອງສັບຂັນທັງຫຼາຍ
ບັດນີ້ເຮົາບໍ່ມີຄວາມຍິນດີໃນການທີ່ທ່ານເວົ້າເຖິງ

[໑໘໘] ເຮົາກຳຈັດຄວາມເພີດເພີນໃນກາມທັງປວງໄດ້ແລ້ວ
ທຳລາຍກອງຄວາມມືດໄດ້ແລ້ວ
ມານຜູ້ຊົ່ວຊ້າເລວຊາມ ທ່ານຈົ່ງຮູ້ແນວນີ້
ທ່ານຖືກເຮົາກຳຈັດແລ້ວ

[໑໘໙] ພວກຄົນຈ້ຳບໍ່ຮູ້ຕາມຄວາມເປັນຈິງ
ພາກັນນອບນ້ອມດວງດາວທັງຫຼາຍ
ບູຊາໄຟຢູ່ໃນປ່າແລ້ວໄດ້ສຳຄັນວ່າບໍລິສຸດ

[໑໘໔] ສ່ວນເຮົາແລ ນອບນ້ອມສະເພາະພຣະສຳມາສຳພຸດທະເຈົ້າ
ເຊິ່ງເປັນບຸຣຸດສູງສຸດ ຈຶ່ງພົ້ນຈາກທຸກທັງປວງ
ຊື່ວ່າເຮັດຕາມຄຳສັ່ງສອນຂອງພຣະສາດສະດາ

# ໔. ສຸຊາຕາເຖຣີຄາຖາ

## ພາສິດຂອງພຣະສຸຊາດາເຖຣີ

(ພຣະສຸຊາດາເຖຣີໄດ້ກ່າວພາສິດເຫຼົ່ານີ້ ດ້ວຍການເປ່ງອຸທານວ່າ)

[໑໘໕] ເຮົາແຕ່ງໂຕ ນຸ່ງຫົ່ມຜ້າຢ່າງດີ ໃສ່ມາໄລ ລູບທາດ້ວຍຈຸນແກ່ນຈັນ
ປະດັບດ້ວຍອາພອນທຸກຢ່າງ ມີໝູ່ສາວໃຊ້ຫ້ອມລ້ອມ

[໑໘໖] ໃຊ້ໝູ່ສາວໃຊ້ໃຫ້ຖືເຂົ້າ ນ້ຳ ຂອງຫຍ້ຳ
ແລະຂອງບໍຣິໂພກບໍ່ແມ່ນໜ້ອຍ ນຳອອກຈາກເຮືອນໄປສູ່ອຸທະຍານ

[໑໘໗] ອອນຊອນສະໜຸກສະໜານໃນອຸທະຍານນັ້ນແລ້ວ
ຂະນະຍ່າງກັບເຮືອນຕົນ
ແວ່ເຂົ້າໄປໃນປ່າອັນຊັນໃກ້ເມືອງສາເກດເພື່ອຊົມວິຫານ

[໑໘໘] ໄດ້ພົບພຣະພຸດທະເຈົ້າຜູ້ເປັນແສງສະຫວ່າງຂອງໂລກແລ້ວເຂົ້າໄປເຝົ້າ
ຖວາຍອະພິວາດພຣະອົງຜູ້ມີພຣະຈັກຂຸ
ໄດ້ຊົງພຣະກະລຸນາສະແດງທຳໂຜດເຮົາ

[໑໘໙] ແລະເຮົາໄດ້ຟັງທຳມະເທດສະໜາຂອງພຣະອົງ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ແລ້ວ

ກໍໄດ້ຮູ້ແຈ້ງສັດຈະ ໄດ້ສຳຜັດທຳຄືອະມະຕະບົດ
ເຊິ່ງປາສະຈາກກິເລດຄືທຸລີໃນບ່ອນນັ້ນນັ້ນເອງ

[໑໕໐] ຕໍ່ແຕ່ນັ້ນ ໄດ້ຮູ້ແຈ້ງພຣະສັດທຳ
ແລ້ວບວດເປັນບັນພະຊິດ
ໄດ້ບັນລຸວິດຊາ ໓ ແລ້ວ
ຄຳສັ່ງສອນຂອງພຣະພຸດທະເຈົ້າບໍ່ເປົ່າປາສະຈາກປະໂຫຍດເລີຍ

# ໕. ອະໂນປະມາເຖຣີຄາຖາ

## ພາສິດຂອງພຣະອະໂນປະມາເຖຣີ

(ພຣະອະໂນປະມາເຖຣີໄດ້ກ່າວພາສິດເຫຼົ່ານີ້ດ້ວຍການເປ່ງອຸທານວ່າ)

[໑໕໑] ເຮົາເກີດໃນຕະກູນສູງມີສິ່ງຂອງເຄື່ອງພໍໃຈຫຼາຍ
ມີຊັບຫຼາຍ ສົມບູນດ້ວຍຜິວພັນສັນຖານແລະຮູບຮ່າງ
ເປັນທິດາເຊິ່ງເປັນລູກແທ້ ໆ ຂອງເມຄິເສດຖີ

[໑໕໒] ເປັນຜູ້ທີ່ພຣະຣາດຊະໂອຣົດປາຖະໜາ ບຸດເສດຖີໝາຍປອງ
ເຂົາພາກັນສົ່ງທູດໄປຂໍຕໍ່ບິດາຂອງເຮົາວ່າ ຂໍຈົ່ງໃຫ້ອະໂນປະມາແກ່ເຮົາ

[໑໕໓] ອະໂນປະມາທິດາຂອງທ່ານນັ້ນມີຄ່າໂຕທໍ່ໃດ
ເຮົາຈະໃຫ້ເງິນແລະຄຳເປັນ ໘ ເທົ່າຕໍ່ຄ່າໂຕນັ້ນ

[໑໕໔] ເຮົານັ້ນໄດ້ພົບພຣະສຳມາສຳພຸດທະເຈົ້າຜູ້ປະເສີດທີ່ສຸດໃນໂລກ
ບໍ່ມີຜູ້ອື່ນຍິ່ງໄປກວ່າ ແລ້ວເຂົ້າໄປເຝົ້າ ຢູ່ບ່ອນທີ່ສົມຄວນ
ໄດ້ຖວາຍອະພິວາດພຣະບາດທັງສອງຂອງພຣະອົງ

[໑໕໕] ພຣະໂຄດົມພຣະອົງນັ້ນໄດ້ຊົງພຣະກະລຸນາສະແດງທຳໂຜດເຮົາ
ເຮົານັ່ງຢູ່ທີ່ອາສະນະນັ້ນ ກໍໄດ້ບັນລຸຜົນທີ ໓

[໑໕໖] ແລ້ວແລ້ວກໍແຖຜົມບວດເປັນບັນພະຊິດ
ມື້ນີ້ເປັນຄືນທີ ໗ ນັບແຕ່ວັນທີເຮົາເຮັດຕັນຫາໃຫ້ແຫ້ງສະນິດແລ້ວ

# ໖. ມະຫາປະຊາປະຕີໂຄຕະມີເຖຣີຄາຖາ

## ພາສິດຂອງພຣະມະຫາປະຊາບໍດີໂຄຕະມີເຖຣີ

(ພຣະມະຫາປະຊາບໍດີໂຄຕະມີເຖຣີປະສົງຈະສະດຸດີພຣະຄຸນພຣະສາດສະດາ ຈຶ່ງໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໑໕໗] ພຣະພຸດທະເຈົ້າຜູ້ຊົງແກ່ກ້າສູງສຸດກວ່າສັດທັງປວງ
ຂ້າພຣະອົງຂໍນອບນ້ອມແດ່
ພຣະພຸດທະອົງຜູ້ຊົງຊ່ອຍປົດເປື້ອງຂ້າພຣະອົງ
ແລະຊົນອື່ນເປັນຈຳນວນຫຼາຍໃຫ້ພົ້ນຈາກທຸກ

[໑໕໘] ຂ້າພຣະອົງກຳນົດຮູ້ທຸກທັງປວງແລ້ວ
ເຮັດຕັນຫາເຊິ່ງເປັນເຫດແຫ່ງທຸກໃຫ້ເຫືອດແຫ້ງແລ້ວ
ໄດ້ຈະເລີນມັກເຊິ່ງປະກອບດ້ວຍອົງ ໘ ແລະໄດ້ບັນລຸນິໂຣດແລ້ວ

[໑໕໙] ຊົນທັງຫຼາຍເປັນມານດາບິດາ ເປັນບຸດທິດາ ເປັນພີ່ນ້ອງ
ເປັນປູ່ຍ່າຕາຍາຍກັນມາໃນຊາດກ່ອນ ໆ
ຂ້າພຣະອົງບໍ່ຮູ້ຕາມຄວາມເປັນຈິງ
ບໍ່ພົບບ່ອນເພິ່ງຈຶ່ງທ່ອງທ່ຽວໄປ

[໑໖໐] ຍ້ອນຂ້າພຣະອົງໄດ້ພົບພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນແລ້ວ
ຮ່າງກາຍນີ້ເປັນຮ່າງກາຍທີ່ມີໃນພົບສຸດທ້າຍ
ການວຽນວ່າຍຕາຍເກີດສິ້ນໄປແລ້ວ
ບັດນີ້ ບໍ່ມີການເກີດອີກ

[໑໖໑] ຂໍພຣະອົງໂຜດທອດພຣະເນດພຣະສາວົກທັງຫຼາຍ
ຜູ້ພ່ຳເພັງພຽນ ມີໃຈເດັດດ່ຽວ
ມີຄວາມບາກບັ່ນໝັ້ນຄົງຢູ່ປະຈຳ ພ້ອມພຽງກັນ
ການກະທຳໂລກຸດຕະຣະທຳໃຫ້ປະຈັກແກ່ຕົນນີ້
ນັບວ່າເປັນການປະກາດພຣະຄຸນຂອງພຣະສຳມາສຳພຸດທະເຈົ້າ
ແລະພຣະພຸດທະສາວົກ

[໑໖໒] ພຣະນາງເຈົ້າມະຫາມາຍາເທວີ ປະສູດພຣະໂຄດົມມາ

ເພື່ອປະໂຫຍດແກ່ຊົນຫຼວງຫຼາຍນໍ
ຍ້ອນພຣະອົງໄດ້ຊົງບັນເທົາທຸກຂອງສັດທັງຫຼາຍ
ທີ່ຍັງຖືກພະຍາທິແລະມໍລະນະສຽບແທງແລ້ວ

## ໗. ສຸດຕາເຖຣີຄາຖາ

### ພາສິດຂອງພຣະສຸດຕາເຖຣີ

(ພຣະຜູ້ມີພຣະພາກເຈົ້າເມື່ອຈະຊົງອະນຸເຄາະພຣະສຸດຕາເຖຣີໄດ້ຕັດພຣະຄາຖາເຫຼົ່ານີ້ວ່າ)

[໑໖໑] ສຸດຕາ ການລະບຸດແລະສົມບັດອັນເປັນທີ່ຮັກ
ອອກບວດເພື່ອປະໂຫຍດແກ່ນິບພານໃດ
ທ່ານຈົ່ງພອກພູນນິບພານນັ້ນເນືອງ ໆ ເທີ້ນ
ຢ່າຕົກຢູ່ໃນອຳນາດຈິດ

[໑໖໔] ສັດທັງຫຼາຍຜູ້ຍັງບໍ່ຮູ້ແຈ້ງ ຖືກຈິດລວງແລ້ວ
ຍິນດີໃນສິ່ງທີ່ເປັນວິໄສຂອງມານ
ຍ່ອມພາກັນທ່ອງທ່ຽວໄປສູ່ຊາດສົງສານບໍ່ແມ່ນໜ້ອຍ

[໑໖໕] ພິກຂຸນີ ທ່ານລະສັງໂຍດເບື້ອງຕ່ຳ ໕ ຢ່າງນີ້ ຄື
ສັກກາຍະທິດຖິ ວິຈິກິດສາ ສີລັບພະຕະປະຣາມາດ
ກາມຣາຄະ ປະຕິຄະ

[໑໖໖] ໃຫ້ຂາດແລ້ວ ຢ່າໄດ້ກັບມາສູ່ການະພົບນີ້ອີກ

[໑໖໗] ທ່ານລະເວັ້ນຣູບປະຣາຄະ ອະຣູບປະຣາຄະ ມານະ ອຸດທັດຈະ ອະວິດຊາ
ຕັດສັງໂຍດທັງຫຼາຍແລ້ວ ຈະເຮັດບ່ອນສຸດທຸກໄດ້

[໑໖໘] ເຮັດຊາດສົງສານໃຫ້ສິ້ນໄປແລ້ວ
ກຳນົດຮູ້ພົບໃຫຍ່
ໝົດຄວາມທະຍານຢາກ
ຈະເປັນຜູ້ສະງົບລະງັບຢູ່ໃນປັດຈຸບັນ

## ໗. ວິຊະຍາເຖຣີຄາຖາ

### ພາສິດຂອງພຣະວິຊະຍາເຖຣີ

(ພຣະວິຊະຍາເຖຣີໄດ້ກ່າວພາສິດເຫຼົ່ານີ້ດ້ວຍການເປ່ງອຸທານວ່າ)

[໑໖໙] ເຮົາບັງຄັບຈິດໃຫ້ຢູ່ໃນອຳນາດບໍ່ໄດ້
ຈຶ່ງບໍ່ໄດ້ຄວາມສະງົບໃຈ
ຕ້ອງເຂົ້າອອກຈາກບ່ອນຢູ່ເຖິງ ໔-໕ ຄັ້ງ
[໑໗໐] ຈຶ່ງເຂົ້າໄປຫາພຣະເຂມາພິກຂຸນີ
ໄຕ່ຖາມໂດຍເຄົາລົບ
ທ່ານສະແດງທຳໂຜດເຮົາ ຄື ທາດ ອາຍະຕະນະ
[໑໗໑] ອະຣິຍະສັດ ໔ ອິນຊີ ໕ ພະລະ ໕ ໂພດຊົງ ໗
ແລະມັກມີອົງ ໘ ເພື່ອບັນລຸປະໂຫຍດອັນສູງສຸດ
[໑໗໒] ເຮົາຟັງຄຳຂອງທ່ານແລ້ວໄດ້ປະຕິບັດຕາມທີ່ທ່ານພ່ຳສອນ
ໃນປະຖົມມະຍາມແຫ່ງຣາຕີກໍຣະນຶກຊາດກ່ອນໄດ້
[໑໗໓] ໃນມັດຊິມະຍາມແຫ່ງຣາຕີ ກໍຊຳຣະທິບພະຈັກຂຸໃຫ້ບໍລິສຸດໄດ້
ໃນປັດສິມມະຍາມແຫ່ງຣາຕີ ທຳລາຍກອງແຫ່ງຄວາມມືດໄດ້
[໑໗໔] ໃນການນັ້ນ ເຮົາມີຄວາມສຸກເຊິ່ງເກີດແຕ່ປີຕິແຜ່ໄປທົ່ວຮ່າງກາຍຢູ່
ໃນວັນທີ ໗ ກໍໄດ້ທຳລາຍກອງແຫ່ງຄວາມມືດໄດ້ແລ້ວ
ຈຶ່ງຢຽດຕີນອອກ

**ສັກກະນິບາດ ຈົບ**

# ໗. ສັດຕະກະນິບາດ

## ໑. ອຸດຕະຣາເຖຣີຄາຖາ

### ພາສິດຂອງພຣະອຸດຕະຣາເຖຣີ

(ພຣະປະຕາຈາຣາເຖຣີໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໑໗໕] ມານົບທັງຫຼາຍຖືສາກຕຳເຂົ້າ
ໄດ້ຊັບມາລ້ຽງລູກແລະພັນລະຍາ

[໑໗໖] ທ່ານທັງຫຼາຍຈົ່ງພາກພຽນໃນຄຳສອນຂອງພຣະພຸດທະເຈົ້າ
ທີ່ກະທຳແລ້ວບໍ່ເດືອດຮ້ອນໃນພາຍຫຼັງ
ຈົ່ງຟ້າວລ້າງຕີນແລ້ວນັ່ງຢູ່ບ່ອນທີ່ສົມຄວນ

[໑໗໗] ຈົ່ງຕັ້ງຈິດໃຫ້ແນ່ວແນ່ມີອາລົມດຽວແລ້ວ
ພິຈາລະນາສັງຂານທັງຫຼາຍໂດຍຄວາມເປັນຂອງປັ່ນປ່ວນ
ແລະໂດຍຄວາມເປັນຂອງບໍ່ແມ່ນຂອງຕົນ
ພຣະອຸດຕະຣາເຖຣີ(ໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໑໗໘] ເຮົາຟັງຄຳພ່ຳສອນຂອງພຣະປະຕາຈາຣາເຖຣີນັ້ນແລ້ວ
ລ້າງຕີນ ເຂົ້າໄປນັ່ງຢູ່ບ່ອນທີ່ສົມຄວນ

[໑໗໙] ໃນປະຖົມມະຍາມແຫ່ງຣາຕີຣະນຶກຊາດກ່ອນໄດ້ແລ້ວ
ໃນມັດຊິມະຍາມແຫ່ງຣາຕີຊຳຣະທິບພະຈັກຂຸໃຫ້ບໍລິສຸດໄດ້

[໑໘໐] ໃນປັດສິມມະຍາມແຫ່ງຣາຕີທຳລາຍກອງແຫ່ງຄວາມມືດໄດ້ແລ້ວ
ໄດ້ບັນລຸວິດຊາ ໓ ຈຶ່ງລຸກຈາກອາສະນະ ໃນພາຍຫຼັງ
ໄດ້ເຮັດຕາມຄຳສອນຂອງທ່ານແລ້ວ

[໑໘໑] ຈະຢູ່ຫ້ອມລ້ອມທ່ານ
ຄືເທວະດາຊັ້ນຕາວະຕິງສາຫ້ອມລ້ອມທ້າວສັກກະຜູ້ບໍ່ປຣາໄຊໃນສົງຄາມ
ເຮົາໄດ້ບັນລຸວິດຊາ ໓ ເປັນຜູ້ບໍ່ມີອາສະວະ

## ໔. ຈາລາເຖຣີຄາຖາ

## ພາສິດຂອງພຣະຈາລາເຖຣີ

ພຣະຈາລາເຖຣີ (ເມື່ອຈະກ່າວພາສິດທີ່ມານກ່າວແກ່ຕົນ ຈຶ່ງໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໑໘໔] ເຮົາເປັນພິກຂຸນີ ອົບຮົມອິນຊີແລ້ວ ຕັ້ງສະຕິໄວ້ໝັ້ນ
ຮູ້ແຈ້ງບົດອັນສະງົບເປັນເຫດເຂົ້າໄປສະງົບລະງັບສັງຂານເປັນສຸກ

(ມານຖາມວ່າ)

[໑໘໓] ທ່ານມີຫົວໂລ້ນບວດເຈາະຈົງໃຜນໍ
ວາງໂຕຄືສະມະນະ ທ່ານບໍ່ພໍໃຈລັດທິເດຍຣະຖີ
ເປັນຫຍັງຍັງມາງົມງວາຍປະພຶດທາງຜິດນີ້ຢູ່ນໍ

(ພຣະຈາລາເຖຣີຕອບວ່າ)

[໑໘໔] ເຫຼົ່າຊົນທີ່ຖືລັດທິເດຍຣະຖີນອກຈາກສາດສະໜານີ້
ຢຶດໝັ້ນທິດຖິທັງຫຼາຍ
ບໍ່ຮູ້ແຈ້ງທຳ ບໍ່ສະຫຼາດໃນທຳ

[໑໘໕] ສ່ວນພຣະພຸດທະເຈົ້າ ສະເດັດອຸບັດໃນຕະກູນສາກະຍະ ບໍ່ມີຜູ້ໃດ
ປຽບປານ ພຣະອົງໄດ້ຊົງສະແດງທຳໂຜດເຮົາ
ອັນເປັນອຸບາຍກ້າວລ່ວງເຊິ່ງທິດຖິທັງຫຼາຍ ຄື

[໑໘໖] ທຸກ ເຫດໃຫ້ເກີດທຸກ ຄວາມດັບທຸກ
ແລະອະຣິຍະມັກມີອົງ ໘ ເຊິ່ງເປັນຂໍ້ປະຕິບັດໃຫ້ເຖິງຄວາມດັບທຸກ

[໑໘໗] ເຮົາຟັງຄຳສອນຂອງພຣະອົງແລ້ວ ຍິນດີຢູ່ໃນຄຳສອນ
ໄດ້ບັນລຸວິດຊາ ໓ ໄດ້ເຮັດຕາມຄຳສັ່ງສອນຂອງພຣະພຸດທະເຈົ້າແລ້ວ

[໑໘໘] ເຮົາກຳຈັດຄວາມເພີດເພີນໃນກາມທັງປວງໄດ້ແລ້ວ
ທຳລາຍກອງແຫ່ງຄວາມມືດໄດ້ແລ້ວ
ມານຜູ້ຊົ່ວຊ້າເລວຊາມ ທ່ານຈົ່ງຮູ້ແນວນີ້ວ່າ
ທ່ານຖືກເຮົາກຳຈັດແລ້ວ

## ໓. ອຸປະຈາລາເຖຣີຄາຖາ

## ພາສິດຂອງພຣະອຸປະຈາລາເຖຣີ

ພຣະອຸປະຈາລາເຖຣີ(ເມື່ອຈະກ່າວພາສິດທີ່ມານກ່າວແກ່ຕົນຈຶ່ງໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໑໘໙] ເຮົາເປັນພິກຂຸນີ ມີສະຕິ ມີຈັກຂຸ ອົບຮົມອິນຊີແລ້ວ
ຮູ້ແຈ້ງບົດອັນສະຫງົບເຊິ່ງອຸດົມບຸຣຸດຄົບຫາແລ້ວ

(ມານຖາມວ່າ)

[໑໙໐] ເປັນຫຍັງ ແມ່ນາງຈຶ່ງບໍ່ພໍໃຈຄວາມເກີດ
ຍ້ອນທຳມະດາຜູ້ເກີດມາແລ້ວຍ່ອມບໍຣິໂພກກາມທັງຫຼາຍ
ເຊີນແມ່ນາງບໍຣິໂພກຄວາມຍິນດີໃນກາມທັງຫຼາຍເທີ້ນ
ແມ່ນາງຢ່າໄດ້ມີຄວາມເດືອດຮ້ອນໃນພາຍຫຼັງເລີຍ

(ພຣະອຸປະຈາລາເຖຣີຕອບວ່າ)

[໑໙໑] ຜູ້ເກີດມາແລ້ວຈະຕ້ອງຕາຍ ຈະຕ້ອງຖືກຕັດມືຕັດຕີນ
ຖືກຂ້າ ຖືກຄຸມຂັງ ເກີດມາແລ້ວຈຳຕ້ອງປະສົບທຸກ

[໑໙໒] ພຣະສຳມາສຳພຸດທະເຈົ້າສະເດັດອຸບັດໃນຕະກູນສາກະຍະ
ຜູ້ຊົງຊະນະແລ້ວ ຊົງພະຊົນຊີບຢູ່
ພຣະອົງໄດ້ຊົງສະແດງທຳໂຜດເຮົາອັນເປັນອຸບາຍກ້າວລ່ວງ ເຊິ່ງຊາດ ຄື

[໑໙໓] ທຸກ ເຫດໃຫ້ເກີດທຸກ ຄວາມດັບທຸກ
ແລະອະຣິຍະມັກມີດ້ວຍອົງ ໘ ເຊິ່ງເປັນຂໍ້ປະຕິບັດໃຫ້ເຖິງຄວາມດັບທຸກ

[໑໙໔] ເຮົາໄດ້ຟັງຄຳສອນຂອງພຣະອົງແລ້ວ ຍິນດີຢູ່ໃນຄຳສອນ
ໄດ້ບັນລຸວິດຊາ ໓ ໄດ້ເຮັດຕາມຄຳສັ່ງສອນຂອງພຣະພຸດທະເຈົ້າແລ້ວ

[໑໙໕] ກຳຈັດຄວາມເພີດເພີນໃນກາມທັງປວງໄດ້ແລ້ວ
ທຳລາຍກອງແຫ່ງຄວາມມືດໄດ້ແລ້ວ
ມານຜູ້ຊົ່ວຊ້າເລວຊາມ ທ່ານຈົ່ງຮູ້ແນວນີ້ວ່າ
ທ່ານຖືກເຮົາກຳຈັດແລ້ວ

**ສັດຕະກະນິບາດ ຈົບ**

# ໘. ອັດຖະກະນິບາດ

## ໑. ສີສູປະຈາລາເຖຣີຄາຖາ

ພາສິດຂອງພຣະສີສູປະຈາລາເຖຣີ

(ພຣະສີສູປະຈາລາເຖຣີເມື່ອຈະກ່າວພາສິດທີ່ມານກ່າວແກ່ຕົນຈຶ່ງໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໑໙໖] ພິກຂຸນີ ຜູ້ມີສິນສົມບູນ ສັງລວມອິນຊີດີແລ້ວ
ບັນລຸບົດອັນສະຫງົບທີ່ໃຜເຮັດໃຫ້ເສຍຫາຍບໍ່ໄດ້ ມີສະພາວະຊື່ນໃຈ

(ມານຖາມວ່າ)

[໑໙໗] ແມ່ນາງຈົ່ງຕັ້ງຈິດປາຖະໜາໄວ້ໃນໝູ່ເທບຊັ້ນຕາວະຕິງສາ

ຊັ້ນຍາມາ ຊັ້ນດຸສິດ ຊັ້ນນິມມານະຣະດີ ແລະຊັ້ນປະຣະນິມມິຕະວະສະວັດດີ
ທີ່ແມ່ນາງເຄີຍຢູ່ມາແລ້ວແຕ່ກ່ອນເທີ້ນ

(ພຣະສີສູປະຈາລາເຖຣີຕອບວ່າ)

[໑໙໘] ເທວະດາຊັ້ນຕາວະຕິງສາ ຊັ້ນຍາມາ ຊັ້ນດຸສິດ ຊັ້ນນິມມານະຣະດີ
ແລະຊັ້ນປະຣະນິມມິຕະວະສະວັດດີ

[໑໙໙] ພາກັນໄປຈາກພົບສູ່ພົບຕະຫຼອດການ ຕິດຢູ່ໃນກາຍຕົນ
ລ່ວງກາຍຂອງຕົນໄປບໍ່ໄດ້ ກໍແລ່ນໄປຫາຊາດແລະມໍລະນະ

[໒໐໐] ໂລກທັງປວງຖືກໄຟໄໝ້ ລຸກຮຸ່ງສະຫວ່າງສະໄຫວ ຫວັ່ນໄຫວແລ້ວ

[໒໐໑] ພຣະພຸດທະເຈົ້າຊົງສະແດງທຳທີ່ບໍ່ຫວັ່ນໄຫວ ຊັ່ງບໍ່ໄດ້
ປຸຖຸຊົນເສບບໍ່ໄດ້ ໂຜດເຮົາ ໃຈຂອງເຮົາຍິນດີຫຼາຍໃນທຳນັ້ນ

[໒໐໒] ເຮົາຟັງຄຳສອນຂອງພຣະອົງແລ້ວ ຍິນດີຢູ່ໃນຄຳສອນ
ໄດ້ບັນລຸວິດຊາ ໓ ໄດ້ເຮັດຕາມຄຳສັ່ງສອນຂອງພຣະພຸດທະເຈົ້າແລ້ວ

[໒໐໓] ກຳຈັດຄວາມເພີດເພີນໃນການທັງປວງ
ທຳລາຍກອງແຫ່ງຄວາມມືດໄດ້ແລ້ວ ມານຜູ້ຊົ່ວຊ້າເລວຊາມ
ທ່ານຈົ່ງຮູ້ແບບນີ້ວ່າ ທ່ານຖືກເຮົາກຳຈັດແລ້ວ

**ອັດຖະກະນິບາດ ຈົບ**

# ໙. ນະວະກະນິບາດ

## ໑. ວັດທະມາຕຸເຖຣີຄາຖາ

### ພາສິດຂອງພຣະວັດທະມາຕາເຖຣີ

(ພຣະວັດທະມາຕາເຖຣີເມື່ອຈະກ່າວຕັກເຕືອນພຣະວັດທະເຖຣະ ຈຶ່ງໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໒໐໔] ລູກວັດທະ ກິເລດຄືໝູ່ໄມ້ໃນປ່າ ໃນໂລກ
ຢ່າໄດ້ມີແກ່ລູກບໍ່ວ່າໃນການໃດ ໆ ເລີຍ
ລູກເອີຍ ລູກຢ່າໄດ້ເປັນຜູ້ມີຄວາມທຸກບໍ່ສິ້ນສຸດເລີຍ

[໔໐໕] ລູກວັດທະ ພຣະມຸນີທັງຫຼາຍ ບໍ່ຫວັ່ນໄຫວ
ຕັດຄວາມສົງໄສໄດ້ ເປັນຜູ້ເຢັນ
ເຖິງຄວາມເຝິກຝົນແລ້ວເປັນຜູ້ບໍ່ມີອາສະວະຢູ່ຢ່າງສະບາຍ

[໔໐໖] ລູກວັດທະ ລູດເພິ່ງພອກພູນມັກ
ເຊິ່ງເປັນທາງທີ່ທ່ານຜູ້ສະແຫວງຫາຄຸນເຫຼົ່ານັ້ນປະພຶດກັນມາແລ້ວ
ເພື່ອບັນລຸຍານທັດສະນະ ເພື່ອເຮັດບ່ອນສຸດທຸກ

(ພຣະວັດທະເຖຣະ ກ່າວຕອບດ້ວຍພາສິດນີ້ວ່າ)

[໔໐໗] ທ່ານແມ່ ແມ່ຜູ້ໃຫ້ກຳເນີດ ທ່ານແມ່ກ້າກ່າວຄາຖານີ້ແກ່ລູກ
ທ່ານແມ່ ລູກເຂົ້າໃຈວ່າ
ກິເລດຄືໝູ່ໄມ້ໃນປ່າຂອງທ່ານແມ່ ແມ່ຄົງບໍ່ມີແນ່ແລ້ວ

(ພຣະເຖຣີກ່າວພາສິດເຫຼົ່ານີ້ວ່າ)

[໔໐໘] ລູກວັດທະ ສັງຂານແນວໃດແນວໜຶ່ງ
ທັງຊົ່ວ ປະນີດ ແລະປານກາງ
ກິເລດຄືໝູ່ໄມ້ໃນປ່າໃນສັງຂານເຫຼົ່ານັ້ນຂອງແມ່
ອະນູໜຶ່ງກໍດີ ຂະໜາດອະນູໜຶ່ງກໍດີ ບໍ່ມີເລີຍ

[໔໐໙] ເມື່ອແມ່ບໍ່ຜະໝາດເພ່ງຢູ່
ອາສະວະໝົດສິ້ນແລ້ວ
ແມ່ບັນລຸວິດຊາ ໓
ໄດ້ເຮັດຕາມຄຳສັ່ງສອນຂອງພຣະພຸດທະເຈົ້າແລ້ວ

(ພຣະເຖຣະເມື່ອຈະພະຍາກອນພຣະອະຣະຫັດ ໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໔໑໐] ທ່ານແມ່ໄດ້ມອບເຫຼັກແຫຼມ
ຄືໂອວາດອັນໂອລານແກ່ເຮົານໍ
ທ່ານແມ່ຂອງເຮົາໄດ້ກ່າວພາສິດທີ່ປະກອບດ້ວຍປະໂຫຍດຢ່າງຍິ່ງ
ຄືມານດາຜູ້ອະນຸເຄາະອື່ນ ໆ
[໔໑໑] ລູກຟັງຄຳພ່ຳສອນຂອງທ່ານແມ່ຜູ້ໃຫ້ກຳເນີດນັ້ນແລ້ວ
ເຖິງຄວາມສະຫຼົດໃຈໃນທຳ
ເພື່ອບັນລຸທຳທີ່ປອດໂປ່ງຈາກໂຍຄະກິເລດ

[໔໑໒] ເຮົານັ້ນຖືກທ່ານແມ່ເຕືອນຢູ່
ມີໃຈເດັດດ່ຽວ
ດ້ວຍການພ່ຳເພັງພຽນ
ບໍ່ຂີ້ຄ້ານທັງກາງເວັນແລະກາງຄືນ
ໄດ້ສຳຜັດຄວາມສະງົບອັນປະເສີດແລ້ວ

**ນະວະກະນິບາດ ຈົບ**

# ໑໐. ເອກາທະສະກະນິບາດ

## ໑. ກິສາໂຄຕະມີເຖຣີຄາຖາ
## ພາສິດຂອງພຣະກິສາໂຄຕະມີເຖຣີ

(ພຣະກິສາໂຄຕະມີເຖຣີໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໔໑໓] ພຣະມຸນີກ່າວສັນເສີນຄວາມເປັນຜູ້ມີກັນລະຍານະມິດ
ໄວ້ສະເພາະຊາວໂລກວ່າ ຜູ້ຄົບກັນລະຍານະມິດ
ເຖິງແມ່ນຈະເປັນພານ ກໍຈະເພິ່ງເປັນບັນດິດໄດ້ແດ່

[໔໑໔] ສັດຕະບຸຣຸດເປັນຄົນທີ່ຄວນຄົບ
ຜູ້ຄົບສັດຕະບຸຣຸດ ປັນຍາຍ່ອມຈະເລີນໄດ້ແນ່ນອນ
ຜູ້ຄົບສັດຕະບຸຣຸດ ເພິ່ງພົ້ນຈາກທຸກທັງມວນໄດ້

[໔໑໕] ແລະເພິ່ງຮູ້ແຈ້ງອະຣິຍະສັດ ໔ ຄື
ທຸກ ໑ ເຫດໃຫ້ເກີດທຸກ ໑ ຄວາມດັບທຸກ ໑
ອະຣິຍະມັກມີອົງແປດ ໑

(ຍັກຂິນີກ່າວວ່າ)

[໔໑໖] ພຣະຜູ້ມີພຣະພາກເຈົ້າເປັນສາຣະຖີຜູ້ຊົງເຝິກຄົນທີ່ຄວນເຝິກ
ຕັດວ່າ ຄວາມເປັນແມ່ຍິງເປັນທຸກ
ຍ້ອນແມ່ນຄວາມເປັນແມ່ຍິງມີສາມີຮ່ວມກັນກໍເປັນທຸກ
ແມ່ຍິງລາງພວກຄອດເທື່ອດຽວ

[໔໑໗] ອິດກັ້ນຄວາມທຸກທີ່ເກີດຂຶ້ນຍ້ອນການເກີດລູກບໍ່ໄຫວ

ຈຶ່ງປາດຄໍຕົນເອງສາກໍມີ
ລາງພວກມີຮ່າງກາຍອ່ອນແອ
ທົນຄວາມລໍາບາກບໍ່ໄດ້ ກິນຢາພິດສາກໍມີ
ເດັກຢູ່ໃນທ້ອງ ແລະມານດາຜູ້ຖືພາ
ຍ່ອມປະສົບຄວາມຍ່ອຍຍັບທັງສອງຄົນກໍມີ

(ພຣະປະຕາຈາຣາເຖຣີກ່າວວ່າ)

[໔໑໗] ເຮົາເວລາຖືພາແກ່ໃກ້ຄອດ
ເດີນທາງໄປບໍ່ທັນເຖິງເຮືອນຕົນ
ກໍເກີດລູກທີ່ລະຫວ່າງທາງ ພົບສາມີຕາຍ
[໔໑໘] ບຸດທັງສອງກໍຕາຍ ສາມີກໍຕາຍສາທີ່ລະຫວ່າງທາງ
ມານດາບິດາ ແລະອ້າຍຂອງເຮົາຜູ້ກໍາພ້າ
ຖືກເຜົາຢູ່ເທິງກອງຟອນດຽວກັນ

(ພຣະກີສາໂຄຕະມີເຖຣີກ່າວວ່າ)

[໔໔໐] ເຈົ້າ ເມື່ອສິ້ນຕະກູນແລ້ວ ຕົກເປັນຄົນກໍາພ້າ
ສະເຫວີຍທຸກຫາປະມານບໍ່ໄດ້
ກໍແລນໍ້າຕາຂອງເຈົ້າໄຫຼຕະຫຼອດມາຫຼາຍພັນຊາດ
[໔໔໑] ເຮົາເຫັນເຈົ້າແລະຊີ້ນບຸດຂອງເຈົ້າ
ຖືກໝາເປັນຕົ້ນກັດກິນທີ່ທ່າມກາງປ່າຊ້າ
ເຮົາພ້ອມກັບສາມີມີຕະກູນສູນຫາຍແລ້ວ
ຖືກຊົນທັງປວງຕິຕຽນແລ້ວໄດ້ບັນລຸອະມະຕະທໍາ
[໔໔໔] ອະຣິຍະມັກມີອົງ ໗ ເປັນຂໍ້ປະຕິບັດໃຫ້ເຖິງອະມະຕະທໍາ
ເຮົາໄດ້ຈະເລີນແລ້ວ
ແມ່ນນິບພານເຮົາກໍເຮັດໃຫ້ແຈ້ງແລ້ວ
ເຮົາໄດ້ພົບແກ້ວຄືທໍາແລ້ວ
[໔໔໓] ຕັດລູກສອນໄດ້ ປົງພາຣະໄດ້ແລ້ວ
ເຮັດກິດທີ່ຄວນເຮັດສໍາເລັດແລ້ວ
ກີສາໂຄຕະມີເຖຣີຜູ້ມີຈິດລຸດພົ້ນດີແລ້ວ
ໄດ້ກ່າວເນື້ອຄວາມນີ້ໄວ້

**ເອກາທະສະກະນິບາດ ຈົບ**

# ໑໑. ທະວາທະສະກະນິບາດ

## ໑. ອຸປະລະວັນນາເຖຣີຄາຖາ

### ພາສິດຂອງພຣະອຸບົນວັນນາເຖຣີ

(ພຣະອຸບົນວັນນາເຖຣີອາໄສພາສິດທີ່ແມ່ອອກແມ່ຂອງພຣະຄັງຄາຕີຣິຍະເຖຣະກ່າວ ຈຶ່ງໄດ້ກ່າວພາສິດນີ້ວ່າ)

[໔໔໔] ເຮົາ ໒ ຄົນ ຄື ມານດາແລະທິດາມີສາມີຮ່ວມກັນ
ເຮົານັ້ນໄດ້ມີຄວາມສະຫຼົດໃຈ ຂົນຫົວລຸກແນວບໍ່ເຄີຍມີ

[໔໔໕] ໜ້າຕິຕຽນຫຼາຍ ກາມທັງຫຼາຍບໍ່ສະອາດ
ມີກິ່ນເໝັນ ມີໜາມຫຼາຍ
ທີ່ເຮົາ ໒ ຄົນ ຄື ມານດາແລະທິດາ ເປັນພະຣິຍາຮ່ວມກັນ

[໔໔໖] ເຮົານັ້ນເຫັນໂທດໃນກາມທັງຫຼາຍ
ເຫັນການອອກຈາກກາມໂດຍຄວາມປອດໂປ່ງ
ຈຶ່ງອອກຈາກເຮືອນບວດເປັນບັນພະຊິດໃນນະຄອນຣາດຊະຄືຫ

(ພຣະອຸບົນວັນນາເຖຣີໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໔໔໗] ເຮົາຣະນຶກຊາດກ່ອນໄດ້ ທິບພະຈັກຂຸ ເຈໂຕປະຣິຍະຍານ
ແລະໂສຕະທາດ ເຮົາຊຳຣະໃຫ້ບໍລິສຸດແລ້ວ

[໔໔໘] ແມ່ນລິດເຮົາເຮັດໃຫ້ແຈ້ງແລ້ວ
ເຮົາບັນລຸຄວາມສິ້ນອາສະວະແລ້ວ
ເຮັດອະພິນຍາ ໖ ໃຫ້ແຈ້ງແລ້ວ
ໄດ້ເຮັດຕາມຄຳສັ່ງສອນຂອງພຣະພຸດທະເຈົ້າແລ້ວ

[໔໔໙] ເຮົາເນຣະມິດລົດທຽມດ້ວຍມ້າ ໔ ໂຕດ້ວຍລິດ
ມາຖວາຍອະພິວາດພຣະບາດທັງສອງຂອງພຣະພຸດທະເຈົ້າ
ຜູ້ເປັນບ່ອນເພິ່ງຂອງໂລກ ຊົງພຣະສິຣິ ແລ້ວຢືນຢູ່ບ່ອນທີ່ສົມຄວນ

(ມານເຫັນພຣະເຖຣີນັ່ງຢູ່ທີ່ພັກກາງເວັນ ໄດ້ກ່າວພາສິດນີ້ວ່າ)

[໘໓໐] ທ່ານເຂົ້າໄປໃກ້ຕົ້ນໄມ້ທີ່ມີດອກບານເດຍລະດາດເຖິງຍອດ
ຢືນຢູ່ແຕ່ຜູ້ດຽວທີ່ເທິງ້າຕົ້ນໄມ້
ແລະແມ່ນເພື່ອນໃດ ໆ ຂອງທ່ານກໍບໍ່ມີ
ທ່ານບໍ່ຢ້ານຄວາມສາມຫາວຂອງພວກນັກເລງເຈົ້າຊູ້ບໍ

(ພຣະອຸບົນວັນນາເຖຣີເມື່ອຈະຄຸກຄາມມານ ຈຶ່ງໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໘໓໑] ຕໍ່ໃຫ້ນັກເລງເຈົ້າຊູ້ຕັ້ງແສນຄົນແນວນີ້ຫ້ອມລ້ອມ
ແມ່ນພຽງຂົນຂອງເຮົາກໍບໍ່ເພິ່ງຫວັ່ນໄຫວ ບໍ່ສະເທືອນ
ມານ ທ່ານຜູ້ດຽວຈະເຮັດຫຍັງເຮົາໄດ້

[໘໓໒] ເຮົານັ້ນ ຫາຍໂຕກໍໄດ້ ເຂົ້າທ້ອງທ່ານກໍໄດ້
ຢືນຢູ່ລະຫວ່າງຄິ້ວຂອງທ່ານກໍໄດ້
ເຮົາຢືນຢູ່ ທ່ານກໍແນມບໍ່ເຫັນ

[໘໓໓] ເຮົາມີຈິດຊ່ຽວຊານ ອິບຣິມອິດທິບາດດີແລ້ວ
ເຮົາເຮັດອະພິນຍາ ໖ ໃຫ້ແຈ້ງແລ້ວ
ໄດ້ເຮັດຕາມຄໍາສັ່ງສອນຂອງພຣະພຸດທະເຈົ້າແລ້ວ

[໘໓໔] ກາມທັງຫຼາຍປຽບດ້ວຍຫອກແລະຫຼາວ
ເປັນຊຽງຮອງສັບຂັນທັງຫຼາຍ
ບັດນີ້ ເຮົາບໍ່ມີຄວາມຍິນດີໃນກາມທີ່ທ່ານເວົ້າເຖິງ

[໘໓໕] ກໍາຈັດຄວາມເພີດເພີນໃນກາມທັງປວງໄດ້ແລ້ວ
ທໍາລາຍກອງແຫ່ງຄວາມມືດໄດ້ແລ້ວ
ມານຜູ້ຊົ່ວຊ້າເລວຊາມ ທ່ານຈົ່ງຮູ້ແນວນີ້ວ່າ
ທ່ານຖືກເຮົາກໍາຈັດແລ້ວ

**ທະວາທະສະກະນິບາດ ຈົບ**

# ໑໔. ໂສລະສະກະນິບາດ

## ໑. ປຸນນາເຖຣີຄາຖາ

### ພາສິດຂອງພຣະປຸນນາເຖຣີ

ພຣະປຸນນາເຖຣີ(ໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໔໓໖] ເຮົາເປັນຄົນຕັກນ້ຳ ຢ້ານຕໍ່ໄພຄືອາດຍາຂອງນາຍ
ຖືກໄພຄືວາຈາແລະໂທສະຂອງນາຍບີບຄັ້ນແລ້ວ
ຈຶ່ງລົງຕັກນ້ຳເປັນປະຈຳ ແມ່ນໜ້າໜາວ

[໔໓໗] ທ່ານພາມ ທ່ານຢ້ານອັນໃດນໍ ຈຶ່ງລົງອາບນ້ຳເປັນປະຈຳ
ທັງມີໂຕສັ່ນເທົາ ປະສົບຄວາມໜາວຢ່າງໜັກ

(ພາມກ່າວຕອບດ້ວຍພາສິດເຫຼົ່ານີ້ວ່າ)

[໔໓໘] ແມ່ປຸນນາຜູ້ຈະເລີນ ກໍທ່ານຮູ້ຢູ່ວ່າ
ເຮົາກຳລັງເຮັດກຸສົນກຳອັນຈະປິດກັ້ນບາບກຳ
ທີ່ໂຕໄດ້ກໍ່ໄວ້ ຍັງຈະສອບຖາມອີກ

[໔໓໙] ຜູ້ໃດບໍ່ວ່າແກ່ຫຼືໜຸ່ມກໍ່ບາບກຳໄວ້
ແມ່ນຜູ້ນັ້ນຍ່ອມພົ້ນຈາກບາບກຳໄດ້ຢ່າງໝົດສິ້ນກໍຍ້ອນການອາບນ້ຳ
(ພຣະປຸນນາເຖຣີກ່າວພາສິດເຫຼົ່ານີ້ວ່າ)

[໔໔໐] ໃຜນໍຊ່າງບໍ່ຮູ້ ມາບອກຄວາມນີ້ແກ່ທ່ານເຊິ່ງບໍ່ຮູ້ວ່າ
ຄົນຈະພົ້ນຈາກບາບກຳໄດ້ກໍຍ້ອນການອາບນ້ຳ

[໔໔໑] ພວກກົບ ເຕົ່າ ງູ ແຂ້ ແລະສັດເຫຼົ່າອື່ນ
ທີ່ທ່ຽວຫາກິນຢູ່ໃນນ້ຳທັງໝົດກໍຄົງພາກັນໄປສະຫວັນແນ່ແທ້

[໔໔໒] ຄົນຂ້າແກະ ຄົນຂ້າໝູ ຊາວປະມົງ ນາຍພານເນື້ອ
ໂຈນ ເພດຊະຄາດ ແລະຄົນທີ່ກໍ່ບາບກຳອື່ນ ໆ ແມ່ນເຫຼົ່ານັ້ນ
ກໍຈະເພິ່ງພົ້ນຈາກບາບກຳໄດ້ຍ້ອນການອາບນ້ຳ

[໔໘໓] ຖ້າແມ່ນ້ຳເຫຼົ່ານີ້ຈະເພິ່ງນຳບາບທີ່ທ່ານກໍ່ໄວ້ແຕ່ກ່ອນໄປໄດ້
ແມ່ນ້ຳເຫຼົ່ານີ້ກໍຈະເພິ່ງນຳທັງບຸນຂອງທ່ານໄປດ້ວຍ
ທ່ານກໍຈະເພິ່ງເປັນຜູ້ຫ່າງຈາກບຸນກຳນັ້ນໄປ

[໔໘໔] ທ່ານພາມ ທ່ານຢ້ານບາບໃດ ຈຶ່ງລົງອາບນ້ຳເປັນປະຈຳ
ທ່ານກໍຢ່າໄດ້ເຮັດບາບອັນນັ້ນ
ຂໍຄວາມໜາວເຢັນຢ່າໄດ້ທຳລາຍຜິວທ່ານເລີຍ

(ພາມກ່າວຕອບດ້ວຍພາສິດວ່າ)

[໔໘໕] ທ່ານນຳຜູ້ຂ້າຜູ້ເດີນທາງຜິດມາສູ່ທາງທີ່ພຣະອະຣິຍະຍ່າງແລ້ວດ້ວຍດີ
ແມ່ປຸນນາຜູ້ຈະເລີນ ຜູ້ຂ້າຂໍຖວາຍຜ້າສາດົກສຳລັບອາບນ້ຳນີ້ແກ່ທ່ານ

(ພຣະປຸນນາເຖຣີໄດ້ກ່າວຕອບດ້ວຍພາສິດເຫຼົ່ານີ້ວ່າ)

[໔໘໖] ຜ້າສາດົກຈົ່ງເປັນຂອງທ່ານຄືເກົ່າເທີ້ນ ເຮົາບໍ່ຕ້ອງການຜ້າສາດົກ
ຖ້າທ່ານຢ້ານທຸກ ຖ້າທຸກບໍ່ໜ້າຮັກສຳລັບທ່ານ
[໔໘໗] ທ່ານກໍຢ່າໄດ້ກໍ່ກຳຊົ່ວທັງໃນກາງແຈ້ງແລະໃນບ່ອນລັບ
ຖ້າທ່ານຈະເຮັດ ຫຼືກຳລັງເຮັດກຳຊົ່ວ
[໔໘໘] ທ່ານເຖິງຈະເຫາະໜີໄປ ກໍບໍ່ພົ້ນຈາກທຸກໄປໄດ້ເລີຍ
ຖ້າທ່ານຢ້ານທຸກ ຖ້າທຸກບໍ່ໜ້າຮັກສຳລັບທ່ານ
[໔໘໙] ທ່ານຈົ່ງເຖິງພຣະພຸດທະເຈົ້າ ພຣະທຳ ແລະພຣະສົງ ຜູ້ໝັ້ນຄົງ
ວ່າເປັນບ່ອນເພິ່ງບ່ອນຣະນຶກເທີ້ນ ຈົ່ງສະມາທານສິນ
ຂໍ້ນັ້ນແລຈະເປັນຄວາມລຸດພົ້ນແກ່ທ່ານ

(ພາມກ່າວຕອບດ້ວຍພາສິດເຫຼົ່ານີ້ວ່າ)

[໔໙໐] ຜູ້ຂ້າຂໍເຖິງພຣະພຸດທະເຈົ້າ ພຣະທຳ ແລະພຣະສົງ ຜູ້ໝັ້ນຄົງ
ວ່າເປັນບ່ອນເພິ່ງບ່ອນຣະນຶກ ຂໍສະມາທານສິນ ຂໍ້ນັ້ນຈະເປັນປະໂຫຍດແກ່ຜູ້ຂ້າ

[໔໙໑] ແຕ່ກ່ອນ ຜູ້ຂ້າເປັນເຜົ່າພັນແຫ່ງພຣະພົມ
ມື້ນີ້ ຜູ້ຂ້າເປັນພາມຈິງ ຜູ້ຂ້າໄດ້ວິດຊາ ໓ ມີຄວາມປອດໄພ
ຈົບເວດ ແລະເປັນຜູ້ລ້າງບາບໄດ້ແລ້ວ

**ໂສລະສະກະນິບາດ ຈົບ**

# ໑໖. ວີສະຕິນິບາດ

## ໑. ອຳພະປາລີເຖຣີຄາຖາ

### ພາສິດຂອງພຣະອຳພະປາລີເຖຣີ

(ພຣະອຳພະປາລີເຖຣີໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໔໕໔] ແຕ່ກ່ອນ ຜົມຂອງເຮົາມີສີດຳຄືສີແມງພູ່
ມີປາຍຜົມງອນ ດຽວນີ້ ຜົມເຫຼົ່ານັ້ນ
ກາຍສະພາບເປັນຄືປ່ານແລະປໍຍ້ອນຊະຣາ
ພຣະດຳຣັດຂອງພຣະພຸດທະເຈົ້າຜູ້ຕັດແຕ່ຄວາມຈິງ
ເປັນຄຳຈິງແທ້ບໍ່ປ່ຽນເປັນແນວອື່ນ

[໔໕໖] ແຕ່ກ່ອນ ມວຍຜົມຂອງເຮົາເຕັມດ້ວຍດອກໄມ້ຫອມຟຸ້ງ
ຄືຜະອົບທີ່ອົບກິ່ນ
ດຽວນີ້ ຜົມນັ້ນມີກິ່ນຄືຂົນກະຕ່າຍຍ້ອນຊະຣາ
ພຣະດຳຣັດຂອງພຣະພຸດທະເຈົ້າຜູ້ຕັດແຕ່ຄວາມຈິງ
ເປັນຄຳຈິງແທ້ ບໍ່ປ່ຽນເປັນແນວອື່ນ

[໔໕໔] ແຕ່ກ່ອນ ຜົມຂອງເຮົາດົກງາມ
ມີປາຍຜົມຮອບໄວ້ດ້ວຍຫວີແລະປິ່ນປັກຜົມ
ຄືປ່າໄມ້ທຶບ ທີ່ປຸກໄວ້ເປັນລະບຽບ ງາມສະພັ່ງ
ດຽວນີ້ ຜົມນັ້ນບາງລົງ ໆ ທົ່ວຫົວຍ້ອນຊະຣາ
ພຣະດຳຣັດຂອງພຣະພຸດທະເຈົ້າຜູ້ຕັດແຕ່ຄວາມຈິງ
ເປັນຄຳຈິງແທ້ ບໍ່ປ່ຽນເປັນແນວອື່ນ

[໔໕໕] ແຕ່ກ່ອນ ຜົມຂອງເຮົາຕົກແຕ່ງດ້ວຍຊ້ອງຜົມ
ປະດັບດ້ວຍປິ່ນຄຳອັນລະອຽດມີກິ່ນຫອມ ງົດງາມ
ດຽວນີ້ ຜົມນັ້ນລ້ານລ່ຽນທັງຫົວ
ພຣະດຳຣັດຂອງພຣະພຸດທະເຈົ້າຜູ້ຕັດແຕ່ຄວາມຈິງ
ເປັນຄຳຈິງແທ້ ບໍ່ປ່ຽນເປັນແນວອື່ນ

[໔໕໗] ແຕ່ກ່ອນ ຄິ້ວຂອງເຮົາ ສວຍງາມຫຼາຍ

ຄ້າຍຮອຍແຕ້ມທີ່ຈິດຕະກອນບັນຈົງແຕ້ມໄວ້
ດຽວນີ້ຄືວນັ້ນມີຫຍ່ອນຍານຫ້ອຍລົງຍ້ອນຊະຣາ
ພຣະດຳຣັດຂອງພຣະພຸດທະເຈົ້າຜູ້ຕັດແຕ່ຄວາມຈິງ
ເປັນຄຳຈິງແທ້ ບໍ່ປ່ຽນເປັນແນວອື່ນ

[໔໕໗] ແຕ່ກ່ອນ ດວງຕາທັງຄູ່ຂອງເຮົາດຳປອດ
ມົນໃຫຍ່ ມີປະກາຍງາມ ຄ້າຍແກ້ວມະນີ
ດຽວນີ້ ຖືກຊະຣາທຳລາຍສາແລ້ວ ຈຶ່ງບໍ່ງາມ
ພຣະດຳຣັດຂອງພຣະພຸດທະເຈົ້າຜູ້ຕັດແຕ່ຄວາມຈິງ
ເປັນຄຳຈິງແທ້ ບໍ່ປ່ຽນເປັນແນວອື່ນ

[໔໕໘] ແຕ່ກ່ອນ ເວລາຍັງລຸ້ນສາວ ດັງຂອງເຮົາໂດ່ງ ງາມ
ຄືກຽວທໍຣະດານທີ່ປັ້ນວາງໄວ້
ດຽວນີ້ຫ່ຽວແຟບຄືຈະຈົມລົງໄປຍ້ອນຊະຣາ
ພຣະດຳຣັດຂອງພຣະພຸດທະເຈົ້າຜູ້ຕັດແຕ່ຄວາມຈິງ
ເປັນຄຳຈິງແທ້ ບໍ່ປ່ຽນເປັນແນວອື່ນ

[໔໕໙] ແຕ່ກ່ອນ ໃບຫູທັງສອງຂອງເຮົາສວຍງາມຫຼາຍ
ຄືກຳໄລແຂນທີ່ຊ່າງເຮັດຢ່າງປະນີດ ສຳເລັດຮຽບຮ້ອຍແລ້ວ
ດຽວນີ້ກັບມີຫຍ່ອນຍານຫ້ອຍລົງຍ້ອນຊະຣາ
ພຣະດຳຣັດຂອງພຣະພຸດທະເຈົ້າຜູ້ຕັດແຕ່ຄວາມຈິງ
ເປັນຄຳຈິງແທ້ ບໍ່ປ່ຽນເປັນແນວອື່ນ

[໔໖໐] ແຕ່ກ່ອນ ແຂ້ວຂອງເຮົາສວຍງາມຫຼາຍ
ຄືສີໜໍ່ຕູມຂອງຕົ້ນກ້ວຍ
ດຽວນີ້ ກັບຫັກ ມີສີເຫຼືອງປົນແດງຍ້ອນຊະຣາ
ພຣະດຳຣັດຂອງພຣະພຸດທະເຈົ້າຜູ້ຕັດແຕ່ຄວາມຈິງ
ເປັນຄຳຈິງແທ້ ບໍ່ປ່ຽນເປັນແນວອື່ນ

[໔໖໑] ແຕ່ກ່ອນ ເຮົາເວົ້າສຽງມ່ວນ ຄືນົກກາເວົາ
ທີ່ທ່ຽວໄປໃນເຂດປ່າ ສົ່ງສຽງມ່ວນຢູ່ໃນປ່າໃຫຍ່
ດຽວນີ້ຄຳເວົ້າຂອງເຮົາພາດໄປ ທຸກ ໆ ຄຳຍ້ອນຊະຣາ
ພຣະດຳຣັດຂອງພຣະພຸດທະເຈົ້າຜູ້ຕັດແຕ່ຄວາມຈິງ
ເປັນຄຳຈິງແທ້ ບໍ່ປ່ຽນເປັນແນວອື່ນ

[໔໖໔] ແຕ່ກ່ອນ ຄໍຂອງເຮົາສວຍງາມຫຼາຍ
ກົມກ້ຽງຄືສັງຄໍາຂັດສີດີແລ້ວ
ດຽວນີ້ ກາຍເປັນງຸ້ມກ່ອມລົງຍ້ອນຊະຣາ
ພຣະດໍາຣັດຂອງພຣະພຸດທະເຈົ້າຜູ້ຕັດແຕ່ວາມະຈິງ
ເປັນຄໍາຈິງແທ້ ບໍ່ປ່ຽນເປັນແນວອື່ນ

[໔໖໑] ແຕ່ກ່ອນ ແຂນທັງສອງຂອງເຮົາສວຍງາມຫຼາຍ
ຄືໄມ້ກອນກົມກ້ຽງ
ດຽວນີ້ ກາຍເປັນລີບ ຄືງ່າແຄຄົດຍ້ອນຊະຣາ
ພຣະດໍາຣັດຂອງພຣະພຸດທະເຈົ້າຜູ້ຕັດແຕ່ຄວາມຈິງ
ເປັນຄໍາຈິງແທ້ ບໍ່ປ່ຽນເປັນແນວອື່ນ

[໔໖໔] ແຕ່ກ່ອນ ມືທັງສອງຂອງເຮົາສວຍງາມຫຼາຍ
ປະດັບດ້ວຍແຫວນຄໍາງາມຣະຍັບ
ດຽວນີ້ ກາຍເປັນຄືເຫງົ້າມັນຍ້ອນຊະຣາ
ພຣະດໍາຣັດຂອງພຣະພຸດທະເຈົ້າຜູ້ຕັດແຕ່ຄວາມຈິງ
ເປັນຄໍາຈິງແທ້ ບໍ່ປ່ຽນເປັນແນວອື່ນ

[໔໖໕] ແຕ່ກ່ອນ ຖັນທັງສອງຂອງເຮົາເຕ່ງຕຶງກົມກ້ຽງ
ຕັ້ງປະຊິດກັນ ທັງງອນສ້າງສວຍງາມຫຼາຍ
ດຽວນີ້ ກາຍເປັນຍ່ອນຍານຄືຖົງໜັງບໍ່ມີນໍ້າຍ້ອນຊະຣາ
ພຣະດໍາຣັດຂອງພຣະພຸດທະເຈົ້າຜູ້ຕັດແຕ່ຄວາມຈິງ
ເປັນຄໍາຈິງແທ້ ບໍ່ປ່ຽນເປັນແນວອື່ນ

[໔໖໖] ແຕ່ກ່ອນ ຮ່າງກາຍຂອງເຮົາກ້ຽງເກົາສວຍງາມຫຼາຍ
ຄືກັບແຜ່ນຄໍາທີ່ຂັດດີແລ້ວ
ດຽວນີ້ ດາດດື່ນໄປດ້ວຍຮອຍຫ່ຽວຍານອັນລະອຽດຍ້ອນຊະຣາ
ພຣະດໍາຣັດຂອງພຣະພຸດທະເຈົ້າຜູ້ຕັດແຕ່ຄວາມຈິງ
ເປັນຄໍາຈິງແທ້ ບໍ່ປ່ຽນເປັນແນວອື່ນ

[໔໖໗] ແຕ່ກ່ອນ ຂາອ່ອນທັງສອງຂອງເຮົາສວຍງາມຫຼາຍ
ປຽບຄືງວງຊ້າງ
ດຽວນີ້ ເປັນປົມເປັນປຸ່ມ ຄືຂໍ້ໄມ້ໄຜ່ຍ້ອນຊະຣາ
ພຣະດໍາຣັດຂອງພຣະພຸດທະເຈົ້າຜູ້ຕັດແຕ່ຄວາມຈິງ

ເປັນຄຳຈິງແທ້ ບໍ່ປ່ຽນເປັນແນວອື່ນ

[໘໖໗] ແຕ່ກ່ອນ ແຂ່ງທັງສອງຂອງເຮົາ ປະດັບດ້ວຍກຳໄລຄຳ
ກັງງເກົາສວຍງາມຫຼາຍ
ດຽວນີ້ ກັບຫ່ຽວແຫ້ງຄືຕົ້ນງາແຫ້ງຍ້ອນຊະຣາ
ພຣະດຳຣັດຂອງພຣະພຸດທະເຈົ້າຜູ້ຕັດແຕ່ຄວາມຈິງ
ເປັນຄຳຈິງແທ້ ບໍ່ປ່ຽນເປັນແນວອື່ນ

[໘໖໘] ແຕ່ກ່ອນ ຕີນທັງສອງຂອງເຮົາສວຍງາມຫຼາຍ
ປຽບຄືເກີບຍັດປຸຍນຸ່ນ
ດຽວນີ້ ແຕກເປັນຮອຍຫຍໍ່ຍ້ອນຊະຣາ
ພຣະດຳຣັດຂອງພຣະພຸດທະເຈົ້າຜູ້ຕັດແຕ່ຄວາມຈິງ
ເປັນຄຳຈິງແທ້ ບໍ່ປ່ຽນເປັນແນວອື່ນ

[໘໗໐] ດຽວນີ້ ຮ່າງກາຍນີ້ເປັນແນວນີ້ ຊຸດໂຊມຍ້ອນຊະຣາ
ເປັນແຫຼ່ງທີ່ຢູ່ແຫ່ງທຸກຫຼວງຫຼາຍ
ປາສະຈາກເຄື່ອງລູບທາ ເປັນຄືເຮືອນອັນຊຸດໂຊມ
ພຣະດຳຣັດຂອງພຣະພຸດທະເຈົ້າຜູ້ຕັດແຕ່ຄວາມຈິງ
ເປັນຄຳຈິງແທ້ ບໍ່ປ່ຽນເປັນແນວອື່ນ

## ໘. ໂຣຫິນີເຖຣີຄາຖາ

### ພາສິດຂອງພຣະໂຣຫິນີເຖຣີ

(ພຣະໂຣຫິນີເຖຣີກ່າວພາສິດທີ່ບິດາແລະຕົນເອງເວົ້າຈາໂຕ້ຕອບກັນດ້ວຍການເປ່ງອຸທານ ວ່າ)

(ບິດາຖາມເຮົາວ່າ)

[໘໗໑] ແມ່ໂຣຫິນີຜູ້ຈະເລີນ ເຈົ້າຫຼັບກໍເວົ້າວ່າສະມະນະ
ຕື່ນກໍເວົ້າວ່າ ສະມະນະ
ສັນເສີນແຕ່ສະມະນະທໍ່ນັ້ນ
ເຫັນວ່າລູກຈະບວດເປັນສະມະນະແທ້ ໆ

[໘໗໘] ໂຣຫິນີ ລູກຖວາຍເຂົ້າແລະນ້ຳອັນໄພບູນແກ່ເຫຼົ່າສະມະນະ
ພໍ່ຂໍຖາມ ດຽວນີ້ ຍ້ອນເຫດໃດເຫຼົ່າສະມະນະຈຶ່ງເປັນທີ່ຮັກຂອງລູກ

[໔໗໓] ພວກສະມະນະບໍ່ມັກເຮັດວຽກງານ ຂີ້ຄ້ານ
ອາໄສແຕ່ຂອງທີ່ຄົນອື່ນໃຫ້ລ້ຽງຊີບ
ຫວັງແຕ່ຈະໄດ້ ມັກຂອງແຊບ
ຍ້ອນເຫດໃດ ເຫຼົ່າສະມະນະຈຶ່ງເປັນທີ່ຮັກຂອງລູກ

(ເຮົາຕອບທ່ານວ່າ)

[໔໗໔] ທ່ານພໍ່ ທ່ານພໍ່ສອບຖາມໄລ່ລຽງກັບລູກ
ເລື້ອງຄຸນຂອງສະມະນະມາຕັ້ງດົນ
ລູກຈະຂະຫຍາຍປັນຍາ ສິນ ແລະຄວາມບາກບັ່ນ
ຂອງສະມະນະເຫຼົ່ານັ້ນແກ່ທ່ານພໍ່ດັ່ງນີ້

[໔໗໕] ສະມະນະທັງຫຼາຍມັກເຮັດວຽກງານ ບໍ່ຂີ້ຄ້ານ
ເຮັດແຕ່ວຽກງານທີ່ປະເສີດສຸດ ຈຶ່ງລະຣາຄະໂທສະໄດ້
ຍ້ອນເຫດນັ້ນ ເຫຼົ່າສະມະນະຈຶ່ງເປັນທີ່ຮັກຂອງລູກ

[໔໗໖] ສະມະນະທັງຫຼາຍ ກຳຈັດມູນຣາກ[໑]ທັງ ໓ ຂອງບາບ
ເຮັດແຕ່ງານສະອາດ ຈຶ່ງລະບາບໄດ້ທັງໝົດ
ຍ້ອນເຫດນັ້ນ ເຫຼົ່າສະມະນະຈຶ່ງເປັນທີ່ຮັກຂອງລູກ

[໔໗໗] ກາຍຍະກຳຂອງສະມະນະເຫຼົ່ານັ້ນສະອາດ
ວະຈີກຳກໍສະອາດ ມະໂນກຳກໍສະອາດ
ຍ້ອນເຫດນັ້ນເຫຼົ່າສະມະນະຈຶ່ງເປັນທີ່ຮັກຂອງລູກ

[໔໗໘] ສະມະນະເຫຼົ່ານັ້ນ ຂາດມົນທິນຄືຫອຍສັງແລະມຸກດາທີ່ຂັດດີແລ້ວ
ສະອາດທັງພາຍໃນແລະພາຍນອກ ບໍລິບູນດ້ວຍທຳຝ່າຍຂາວ
ຍ້ອນເຫດນັ້ນ ເຫຼົ່າສະມະນະຈຶ່ງເປັນທີ່ຮັກຂອງລູກ

[໔໗໙] ສະມະນະເຫຼົ່ານັ້ນເປັນພະຫູສູດ ຊົງທຳ
ເປັນພຣະອະຣິຍະ ເປັນຢູ່ໂດຍທຳ ສະແດງເຫດແລະຜົນ
ຍ້ອນເຫດນັ້ນ ເຫຼົ່າສະມະນະຈຶ່ງເປັນທີ່ຮັກຂອງລູກ

[໔໘໐] ສະມະນະເຫຼົ່ານັ້ນເປັນພະຫູສູດ ຊົງທຳ
ເປັນພຣະອະຣິຍະ ເປັນຢູ່ໂດຍທຳ ມີຈິດມີອາລົມດຽວ[໒] ມີສະຕິ
ຍ້ອນເຫດນັ້ນ ເຫຼົ່າສະມະນະຈຶ່ງເປັນທີ່ຮັກຂອງລູກ

[໔໗໑] ສະມະນະເຫຼົ່ານັ້ນຢູ່ປ່າຫ່າງໄກຜູ້ຄົນ ມີສະຕິ
ເວົ້າດ້ວຍປັນຍາ ບໍ່ຟຸ້ງຊ່ານ ຮູ້ບ່ອນສຸດທຸກ
ຍ້ອນເຫດນັ້ນ ເຫຼົ່າສະມະນະຈຶ່ງເປັນທີ່ຮັກຂອງລູກ

[໔໗໔] ສະມະນະເຫຼົ່ານັ້ນ ຫຼີກອອກຈາກໝູ່ບ້ານໃດໄປ
ບໍ່ຫຼຽວແລຢ່າງກັງວົນໃນໝູ່ບ້ານນັ້ນ
ໄປແບບບໍ່ມີເຍື່ອໃຍເລີຍ
ຍ້ອນເຫດນັ້ນ ເຫຼົ່າສະມະນະຈຶ່ງເປັນທີ່ຮັກຂອງລູກ

[໔໗໓] ສະມະນະເຫຼົ່ານັ້ນບໍ່ເກັບສະສົມຊັບສົມບັດໄວ້ໃນຍຸ້ງສາງ
ໃນໝໍ້ ແລະໃນກະຕ່າ ສະແຫວງຫາແຕ່ອາຫານທີ່ສຳເລັດແລ້ວ
ຍ້ອນເຫດນັ້ນ ເຫຼົ່າສະມະນະຈຶ່ງເປັນທີ່ຮັກຂອງລູກ

[໔໗໔] ສະມະນະເຫຼົ່ານັ້ນບໍ່ຮັບເງິນ ຄຳ ແລະຣູປີຍະ
ລ້ຽງຊີບດ້ວຍປັດໄຈທີ່ເກີດຂຶ້ນສະເພາະໜ້າ
ຍ້ອນເຫດນັ້ນ ເຫຼົ່າສະມະນະຈຶ່ງເປັນທີ່ຮັກຂອງລູກ

[໔໗໕] ສະມະນະເຫຼົ່ານັ້ນບວດມາຈາກຕ່າງສະກຸນກັນ
ແລະຕ່າງຊົນນະບົດກັນ ກໍຮັກເຊິ່ງກັນແລະກັນ
ຍ້ອນເຫດນັ້ນ ເຫຼົ່າສະມະນະຈຶ່ງເປັນທີ່ຮັກຂອງລູກ

(ບິດາກ່າວກັບເຮົາວ່າ)

[໔໗໖] ລູກໂຣຫິນີຜູ້ຈະເລີນ ລູກເກີດມາໃນສະກຸນ
ເພື່ອປະໂຫຍດແກ່ພວກເຮົາແທ້ນໍ
ລູກມີສັດທາ ມີຄວາມເຄົາລົບແຮງກ້າ
ໃນພຣະພຸດ ພຣະທຳ ແລະພຣະສົງ

[໔໗໗] ຍ້ອນລູກຮູ້ຈັກພຣະຣັດຕະນະໄຕຣນັ້ນວ່າ
ເປັນບຸນຍະເຂດອັນປະເສີດ
ສະມະນະເຫຼົ່ານັ້ນຄົງຈະຮັບທັກຂິນາທານຂອງພໍ່ແດ່ເນາະ

[໔໗໘] ຍ້ອນວ່າ ຍັນຄືບຸນທີ່ເຮົາຕັ້ງໄວ້ແລ້ວໃນສະມະນະເຫຼົ່ານັ້ນ
ຄົງຈະມີຜົນໄພບູນແກ່ພວກເຮົາແນ່
(ເຮົາກ່າວກັບບິດາວ່າ) ຖ້າທ່ານພໍ່ຢ້ານທຸກ

ຖ້າທ່ານພໍ່ກຽດຊັງທຸກ

[໔໗໙] ຂໍທ່ານພໍ່ ໂຜດເຖິງພຣະພຸດທະເຈົ້າ ພຣະທຳ ແລະພຣະສົງ
ຜູ້ໝັ້ນຄົງວ່າເປັນບ່ອນເພິ່ງບ່ອນຣະນຶກເທີ້ນ
ຈົ່ງສະມາທານສິນ ຂໍ້ນັ້ນຈະເປັນປະໂຫຍດແກ່ທ່ານພໍ່

(ບິດາກ່າວກັບເຮົາວ່າ)

[໔໙໐] ພໍ່ຂໍເຖິງພຣະພຸດທະເຈົ້າ ພຣະທຳ ແລະພຣະສົງ
ຜູ້ໝັ້ນຄົງວ່າເປັນບ່ອນເພິ່ງບ່ອນຣະນຶກ ຂໍສະມາທານສິນ
ຂໍ້ນັ້ນຈະເປັນປະໂຫຍດແກ່ພໍ່

[໔໙໑] ແຕ່ກ່ອນ ພໍ່ເປັນເຜົ່າພັນແຫ່ງພຣະພົມ
ມື້ນີ້ ພໍ່ເປັນພາມ ພໍ່ໄດ້ວິດຊາ ໓ ມີຄວາມປອດໄພ
ຈົບເວດ ແລະເປັນຜູ້ລ້າງບາບໄດ້ແລ້ວ

# ໓. ຈາປາເຖຣີຄາຖາ

## ພາສິດຂອງພຣະຈາປາເຖຣີ

(ພຣະຈາປາເຖຣີໄດ້ຮີບໂຮມຄາຖາທີ່ອຸປະກາຊີວົກແລະຕົນກ່າວດ້ວຍການເປ່ງອຸທານ ໄດ້ກ່າວພາສິດເຫຼົ່ານີ້ວ່າ)

(ອຸປະກາຊີວົກກ່າວວ່າ)

[໔໙໔] ແຕ່ກ່ອນ ໂຕເຮົາ(ເປັນປະຣິພາຊົກ)ຖືໄມ້ການເທົ້າ
ດຽວນີ້ ເຮົານັ້ນກາຍເປັນນາຍພານລ່າເນື້ອໄປສາແລ້ວ
ບໍ່ອາດຂ້າມຈາກຕັນຫາແລະເປືອກຕົມອັນດຸຮ້າຍ[១]
ໄປສູ່ຝັ່ງນັ້ນໄດ້ເລີຍ

[໔໙໓] ແຕ່ກ່ອນ ນາງຈາປາດູໝິ່ນເຮົາວ່າເປັນຄົນມົວເມົາຫຼາຍ
ຈຶ່ງກ່ອມລູກຫຍໍ້ຫຍັນສຽດສີ
ເຮົາຈະຕັດຄວາມກ່ຽວຂ້ອງດ້ວຍຈາປາໄປບວດສາ

(ເຮົາກ່າວວ່າ)

[໔໙໔] ຢ່າໂກດເລີຍ ທ່ານມະຫາວີຣະ ຢ່າໂກດເລີຍ ທ່ານມະຫາມຸນີ
ຍ້ອນວ່າ ຜູ້ຖືກຄວາມໂກດຄອບງຳແລ້ວ
ບໍ່ມີຄວາມບໍລິສຸດດອກ ແລ້ວຕະບະຈະມີແຕ່ບ່ອນໃດນໍ

(ອຸປະກາຊີວົກກ່າວວ່າ)

[໔໙໕] ເຮົາຈະອອກຈາກບ້ານນາລາ ໃຜຈະຢູ່ໃນບ້ານນາລານີ້ໄດ້
ເຈົ້າຈະມັດເຫຼົ່າສະມະນະຜູ້ລ້ຽງຊີບໂດຍທຳດ້ວຍມານຍາຍິງຢູ່ບໍ

(ເຮົາກ່າວວ່າ)

[໔໙໖] ມາເທີ້ນ ທ່ານກາລະ ກັບມາເທີ້ນ
ເຊີນບໍຣິໂພກກາມຄືແຕ່ກ່ອນ
ເຮົາແລະພວກຍາດຍອມຢູ່ໃນອຳນາດຂອງທ່ານ

(ອຸປະກາຊີວົກກ່າວວ່າ)

[໔໙໗] ຈາປາ ເຈົ້າກ່າວຄຳອ່ອນຫວານເຊັ່ນໃດແກ່ເຮົາ
ເພິ່ງເປ່ງຄຳອ່ອນຫວານໃຫ້ຍິ່ງໄປກວ່ານີ້ອີກ ໔ ເທົ່າ
ຄຳອ່ອນຫວານນັ້ນຈະເພິ່ງເປັນຄຳຈັບໃຈບຸຣຸດ
ຜູ້ຍິນດີໃນທ່ານທີ່ນັ້ນດອກເດີ

(ເຮົາກ່າວວ່າ)

[໔໙໘] ທ່ານກາລະ ເຮົາເຊິ່ງສະສວຍ
ມີເຮືອນຮ່າງງາມດັ່ງຕົ້ນຄົນທາມີດອກບານເດຍລະດາດຢູ່ເທິງຈອມພູ
ດັ່ງເຄືອທັບທິມມີດອກບານແລ້ວ
ດັ່ງຕົ້ນແຄຝອຍມີດອກບານເດຍລະດາດພາຍໃນເກາະ

[໔໙໙] ມີຮ່າງກາຍລູບທາດ້ວຍຈຸນແກ່ນຈັນ
ນຸ່ງຫົ່ມຜ້າແຄວັນກາສີມີຄ່າຫຼາຍ
ຍ້ອນເຫດໃດ ທ່ານຈຶ່ງລະຖິ້ມໄປສານໍ

(ອຸປະກາຊີວົກກ່າວວ່າ)

[໕໐໐] ເຈົ້າຈະຕາມບຽດບຽນເຮົາດ້ວຍຮູບທີ່ຕົກແຕ່ງ
ຄືກັບພານນົກປະສົງຈະຕາມບຽດບຽນນົກ ບໍ່ໄດ້ດອກ

(ເຮົາກ່າວວ່າ)

[໓໐໑] ທ່ານກາລະ ກໍຜົນຄືລູກຂອງເຮົານີ້ທ່ານເຮັດໃຫ້ເກີດມາແລ້ວ
ທ່ານຈະລະຖິ້ມເຮົາເຊິ່ງມີລູກໄປເພື່ອອັນໃດນໍ

(ອຸປະກາຊີວົກກ່າວວ່າ)

[໓໐໒] ທ່ານຜູ້ມີປັນຍາທັງຫຼາຍ ມີຄວາມພຽນຫຼາຍ ຍ່ອມລະພວກລູກ
ຈາກນັ້ນກໍລະພວກຍາດ ຕໍ່ຈາກນັ້ນກໍລະຊັບ
ຕັດເຄື່ອງຜູກພັນໄດ້ຂາດ ແລ້ວອອກບວດ
ຄືພະຍາຊ້າງເຮັດເຄື່ອງມັດໃຫ້ຂາດແລ້ວໜີໄປ

(ເຮົາກ່າວວ່າ)

[໓໐໓] ບັດນີ້ ເຮົາຈະເອົາໄມ້ຄ້ອນທຸບ
ຫຼືເອົາກູິດແທງລູກຄົນນີ້ຂອງທ່ານໃຫ້ລົ້ມລົງເໜືອພື້ນດິນ
ຍ້ອນຄວາມໂສກເສົ້າເຖິງລູກ
ທ່ານຈະໄປບໍ່ໄດ້ແນ່

(ອຸປະກາຊີວົກກ່າວວ່າ)

[໓໐໔] ເຖິງເຈົ້າຈັກຍອມມອບລູກໃຫ້ຝູງໝາຈອກ(ກິນເປັນອາຫານ)
ແນ່ະຍິງຊົ່ວ ຍ້ອນລູກເປັນຕົ້ນເຫດ
ເຈົ້າຈັກເຮັດເຮົາໃຫ້ຫວນກັບມາອີກບໍ່ໄດ້ດອກ

(ເຮົາກ່າວວ່າ)

[໓໐໕] ທ່ານກາລະຜູ້ຈະເລີນ ບັດນີ້ ທ່ານຈັກໄປຢູ່ໄສ
ຈະເປັນໝູ່ບ້ານ ນິຄົມ ນະຄອນ ຣາດຊະທານີໃດ ກໍເຊີນເທີ້ນ

(ອຸປະກາຊີວົກກ່າວວ່າ)

[໓໐໖] ແຕ່ກ່ອນ ເຮົາເປັນເຈົ້າຄະນະ
ບໍ່ເປັນສະມະນະ ແຕ່ສຳຄັນໂຕວ່າເປັນສະມະນະ
ໄດ້ທ່ຽວໄປຕາມໝູ່ບ້ານທຸກໝູ່ບ້ານ ທຸກນະຄອນ ທຸກຣາດຊະທານີ

[໓໐໗] ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນຕັດສະຣູ້

ຢູ່ທີ່ໃກ້ຝັ່ງແມ່ນ້ຳເນຣັນຊະຣາ ຊົງສະແດງທຳໂຜດໝູ່ສັດເພື່ອໃຫ້ລະທຸກທັງປວງ
ເຮົາຄວນຈັກໄປເຝົ້າພຣະອົງ
ພຣະອົງຈັກເປັນສາດສະດາຂອງເຮົາ

(ເຮົາກ່າວວ່າ)

[໓໐໗] ບັດນີ້ ຂໍທ່ານເພິ່ງຂາບທູນພຣະໂລກກະນາດຜູ້ປະເສີດ
ເຖິງການຖວາຍອະພິວາດຂອງເຮົາ
ແລະເພິ່ງທຳປະທັກຂິນ
ແລ້ວອຸທິດສ່ວນບຸນໃຫ້ເຮົາດ້ວຍ

(ອຸປະກາຊີວົກກ່າວວ່າ)

[໓໐໙] ແມ່ຈາປາ ຂໍ້ທີ່ເຈົ້າເວົ້າກັບເຮົາ ເຮົາຮັບໄດ້
ບັດນີ້ເຮົາຈັກຂາບທູນພຣະໂລກກະນາດຜູ້ປະເສີດ
ເຖິງການຖວາຍອະພິວາດຂອງເຈົ້າ
ແລະຈັກທຳປະທັກຂິນ
ແລ້ວອຸທິດສ່ວນບຸນໃຫ້ແກ່ເຈົ້າແມ່

[໓໑໐] ຕໍ່ແຕ່ນັ້ນ ທ່ານກາລະໄດ້ເດີນທາງໄປໃກ້ຝັ່ງແມ່ນ້ຳເນຣັນຊະຣາ
ໄດ້ພົບພຣະສຳມາສຳພຸດທະເຈົ້າຜູ້ກຳລັງຊົງສະແດງອະມະຕະບົດ

[໓໑໑] ຄື ທຸກ ເຫດໃຫ້ເກີດທຸກ ຄວາມດັບທຸກ
ແລະອະຣິຍະມັກມີອົງ ໗ ເປັນຂໍ້ປະຕິບັດໃຫ້ເຖິງຄວາມດັບທຸກ

[໓໑໔] ຖວາຍອະພິວາດພຣະບາດທັງສອງຂອງພຣະອົງ
ທຳປະທັກຂິນພຣະອົງ
ແລ້ວອຸທິດສ່ວນບຸນໃຫ້ຈາປາ
ບວດເປັນບັນພະຊິດ ບັນລຸວິດຊາ ໓
ໄດ້ເຮັດຕາມຄຳສັ່ງສອນຂອງພຣະພຸດທະເຈົ້າແລ້ວ

# ໔. ສຸນທະຣີເຖຣີຄາຖາ

## ພາສິດຂອງພຣະສຸນທະຣີເຖຣີ

(ສຸຊາດພາມຜູ້ເປັນບິດາ ເມື່ອຈະຖາມເຖິງເຫດແຫ່ງການບັນເທົາຄວາມໂສກເສົ້າ ຈຶ່ງຖາມພຣະວາສິດຖີເຖຣີດ້ວຍພາສິດເຫຼົ່ານີ້ວ່າ)

[໓໑໓] ນາງຜູ້ຈະເລີນ ແຕ່ກ່ອນ ເຈົ້າກິນລູກ ໆ ໃຫ້ຕາຍໄປ
ເຈົ້າເດືອດຮ້ອນຢ່າງຍິ່ງທັງກາງເວັນແລະກາງຄືນ

[໓໑໔] ພາມມະນີ ມື້ນີ້ ເຈົ້ານັ້ນກິນລູກໝົດທັງ ໗ ຄົນ
ແມ່ວາສິດຖີ ຍ້ອນເຫດໃດ ເຈົ້າຈຶ່ງບໍ່ເດືອດຮ້ອນຫຍັງເລີຍບໍ

(ພຣະວາສິດຖີເຖຣີກ່າວວ່າ)

[໓໑໕] ທ່ານພາມ ໃນສ່ວນອະດີດ
ລູກແລະໝູ່ຍາດຂອງເຮົາຫຼາຍຮ້ອຍຄົນ
ເຮົາແລະທ່ານກໍກິນກັນມາແລ້ວ

[໓໑໖] ເຮົານັ້ນຮູ້ນິບພານທີ່ເປັນທໍາເຄື່ອງກໍາຈັດ
ເຊິ່ງຄວາມເກີດແລະຄວາມຕາຍອອກໄດ້
ຈຶ່ງບໍ່ເສົ້າໂສກ ບໍ່ຮ້ອງໄຫ້ ແລະບໍ່ເດືອດຮ້ອນ

(ພາມກ່າວວ່າ)

[໓໑໗] ແມ່ວາສິດຖີ ໜ້າອັດສະຈັນແທ້ບໍທີ່ເຈົ້າກ່າວວາຈາແບບນີ້
ເຈົ້າຮູ້ທໍາຂອງໃຜບໍ
ຈຶ່ງກ່າວວາຈາແບບນີ້

(ພຣະວາສິດຖີເຖຣີກ່າວວ່າ)

[໓໑໘] ທ່ານພາມ ພຣະສໍາມາສໍາພຸດທະເຈົ້າພຣະອົງນັ້ນ
ສະເດັດມາເຖິງເມືອງມິຖິລາ
ຊົງສະແດງທໍາໂຜດໝູ່ສັດເພື່ອລະທຸກທັງປວງ

[໓໑໙] ທ່ານພາມ ເຮົາຟັງທໍາທີ່ປາສະຈາກອຸປະທິກິເລດ[1]
ຂອງພຣະອະຣະຫັນຕະສໍາມາສໍາພຸດທະເຈົ້າພຣະອົງນັ້ນ
ຮູ້ແຈ້ງພຣະສັດທໍາໃນທໍາມະເທດສະໜານັ້ນແລ້ວ
ຈຶ່ງບັນເທົາຄວາມໂສກເສົ້າເຖິງລູກໄດ້

(ສຸຊາດພາມກ່າວວ່າ)

[໓໒໐] ເຖິງເຮົານັ້ນກໍຈັກໄປເມືອງມິຖິລາຄືກັນ

ຖ້າແນວໃດ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ
ກໍຄົງຈະຊົງຊ່ອຍປົດເປື້ອງເຮົາຈາກທຸກທັງໝົດໄດ້ແດ່

[໓໔໑] ພາມໄດ້ພົບພຣະພຸດທະເຈົ້າຜູ້ຊົງລຸດພົ້ນແລ້ວ ບໍ່ມີອຸປະທິກິເລດ
ພຣະມຸນີຜູ້ເຖິງຝັ່ງແຫ່ງທຸກໄດ້ຊົງສະແດງທຳໂຜດພາມນັ້ນ

[໓໔໔] ຄື ທຸກ ເຫດໃຫ້ເກີດທຸກ ຄວາມດັບທຸກ
ແລະອະຣິຍະມັກມີອົງ ໘ ເປັນຂໍ້ປະຕິບັດໃຫ້ເຖິງຄວາມດັບທຸກ

[໓໔໓] ສຸຊາດພາມຮູ້ແຈ້ງພຣະສັດທຳ
ໃນພຣະທຳເທດສະໜາຄືອະຣິຍະສັດ ໔ ນັ້ນແລ້ວ
ເຂົ້າບວດໄດ້ ໓ ມື້ ກໍໄດ້ບັນລຸວິດຊາ ໓ ແລ້ວ

(ພຣະສຸຊາດພາມກ່າວກັບນາຍສາຣະຖີວ່າ)

[໓໔໔] ມານີ້ເທີ້ນ ສາຣະຖີ ທ່ານຈົ່ງກັບໄປ
ຈົ່ງມອບລົດຄັນນີ້ໃຫ້ພາມມະນີດ້ວຍ
ແລະຊ່ອຍບອກນາງພາມມະນີເຖິງຄວາມສະບາຍ ບໍ່ເຈັບປ່ວຍວ່າ
ບັດນີ້ ສຸຊາດພາມບວດໄດ້ ໓ ມື້ ກໍໄດ້ບັນລຸວິດຊາ ໓ ແລ້ວ

[໓໔໕] ລຳດັບນັ້ນ ນາຍສາຣະຖີນຳລົດແລະຊັບ ໑,໐໐໐ ກະຫາປະນະ
ໄປມອບໃຫ້ນາງພາມມະນີ ແລະໄດ້ບອກນາງພາມມະນີເຖິງຄວາມສະບາຍ
ບໍ່ເຈັບປ່ວຍວ່າ ບັດນີ້ ສຸຊາດພາມບວດໄດ້ ໓ ມື້ ກໍໄດ້ບັນລຸ
ວິດຊາ ໓ ແລ້ວ

(ພາມມະນີກ່າວວ່າ)

[໓໔໖] ນາຍສາຣະຖີ ເຮົາຟັງເລື້ອງພາມໄດ້ບັນລຸວິດຊາ ໓ ແລ້ວ
ຂໍມອບລົດມ້າຄັນນີ້ແລະຊັບ ໑,໐໐໐ ກະຫາປະນະ
ເປັນລາງວັນຕອບແທນເຈົ້າທີ່ໃຫ້ຂ່າວດີ

(ນາຍສາຣະຖີບໍ່ຍອມຮັບ ກັບກ່າວວ່າ)

[໓໔໗] ຂ້າແດ່ພາມມະນີ ລົດມ້າກັບຊັບ ໑,໐໐໐ ກະຫາປະນະ
ຈົ່ງເປັນຂອງແມ່ເຈົ້າຄືເກົ່າເທີ້ນ
ເຖີງໂຕຂ້ານ້ອຍກໍຈັກບວດໃນສຳນັກຂອງພຣະພຸດທະເຈົ້າ
ຜູ້ມີພຣະປັນຍາອັນປະເສີດ

(ພາມມະນີກ່າວກັບສຸນທະຣີທິດາວ່າ)

[໓໔໗] ບິດາຂອງລູກ ລະຊ້າງ ມ້າ ງົວ ແກ້ວມະນີ ແກ້ວກຸນທົນ
ແລະເຄື່ອງອຸປະກອນເຮືອນຫຼວງຫຼາຍນີ້
ອອກບວດສາແລ້ວ
ລູກສຸນທະຣີລູກຈົ່ງບໍຣິໂພກໂພຄະສົມບັດທັງຫຼາຍ
ຈົ່ງເປັນທາຍາດຮັບມໍລະດົກໃນຕະກູນ ເທີ້ນລູກ

(ສຸນທະຣີຟັງຄໍາຂອງມານດານັ້ນແລ້ວ ເມື່ອຈະປະກາດຄວາມທີ່ຕົນຕັ້ງໃຈຈະອອກບວດ ຈຶ່ງໄດ້ກ່າວພາສິດນີ້ວ່າ)

[໓໔໘] ບິດາຂອງລູກກະທົບກະເທືອນໃຈ
ຍ້ອນຄວາມໂສກເສົ້າເຖິງລູກຊາຍ
ຈຶ່ງລະຊ້າງ ມ້າ ງົວ ແກ້ວມະນີ ແກ້ວກຸນທົນ
ແລະອຸປະກອນເຮືອນທີ່ໜ້າອອນຊອນນີ້ອອກບວດ
ເຖິງລູກກໍກະທົບກະເທືອນໃຈ
ຍ້ອນຄວາມໂສກເສົ້າເຖິງອ້າຍຫຼາຍ
ກໍຈັກອອກບວດດ້ວຍ

(ລໍາດັບນັ້ນ ມານດາເມື່ອຈະນໍາພາສຸນທະຣີທິດາໃນທາງເນກຂໍາມະ ຈຶ່ງໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໓໓໐] ລູກສຸນທະຣີ ຂໍຄວາມດໍາຣິຂອງລູກ
ຈົ່ງສໍາເລັດຕາມທີ່ລູກປາຖະໜາເທີ້ນ
ລູກເມື່ອໃຊ້ສອຍສິ່ງເຫຼົ່ານີ້ ຄື ກ້ອນເຂົ້າທີ່ເພິ່ງລຸກຂຶ້ນຢືນຮັບ
ການທ່ຽວສະແຫວງຫາອາຫານ ແລະນຸ່ງຫົ່ມຜ້າບັງສຸກຸນ
ຈົ່ງເປັນຜູ້ບໍ່ມີອາສະວະໃນໂລກໜ້າເທີ້ນ

(ພຣະສຸນທະຣີຈຶ່ງກ່າວຂໍອະນຸຍາດພຣະພິກຂຸນີຜູ້ເປັນອຸປັດຊາວ່າ)

[໓໓໑] ຂ້າແດ່ແມ່ເຈົ້າ ຂ້ານ້ອຍເມື່ອເປັນສິກຂະມານາ
ກໍຊໍາຣະທິບພະຈັກຂຸໃຫ້ມົດຈົດໄດ້ແລ້ວ
ຂ້ານ້ອຍຣະນຶກຮູ້ເຖິງຊາດກ່ອນທີ່ເຄີຍຢູ່ອາໄສມາໄດ້

[໓໓໔] ຂ້າແດ່ແມ່ເຈົ້າ ຜູ້ມີຄຸນຄວາມດີເປັນຜູ້ງາມໃນໝູ່ພຣະເຖຣີ
ຍ້ອນອາໄສແມ່ທ່ານ ຂ້ານ້ອຍບັນລຸວິດຊາ ໓
ໄດ້ເຮັດຕາມຄໍາສັ່ງສອນຂອງພຣະພຸດທະເຈົ້າແລ້ວ

[໑໑໑]  ຂ້າແດ່ແມ່ເຈົ້າ ໂຜດອະນຸຍາດເທີ້ນຂ້ານ້ອຍ
ຂ້ານ້ອຍປະສົງຈະໄປນະຄອນສາວັດຖີ
ຈັກບັນລືສີຫະນາດໃນສຳນັກພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ

(ພຣະສຸນທະຣີເຖຣີໄປເຖິງນະຄອນສາວັດຖີແລ້ວ ເຂົ້າໄປສູ່ພຣະວິຫານ ໄດ້ເຫັນພຣະສາດສະດາ ປະທັບນັ່ງຢູ່ເທິງທັມມາດ ຈຶ່ງເວົ້າກັບຕົນເອງວ່າ)

[໑໑໔]  ສຸນທະຣີທ່ານຈົ່ງເບິ່ງພຣະສາດສະດາຜູ້ມີພຣະຣັດສະໝີດັ່ງຄຳ
ມີພຣະສະຫວີວັນນະເຮືອງຮອງດັ່ງຄຳ
ຊົງເຝິກເຫຼົ່າຊົນທີ່ໃຜ ໆ ເຝິກບໍ່ໄດ້
ຕັດສະຣູ້ດ້ວຍພຣະອົງເອງ
ບໍ່ມີໄພແຕ່ບ່ອນໃດ ໆ

(ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ)

[໑໑໕]  ຂໍພຣະອົງໂຜດທອດພຣະເນດຂ້ານ້ອຍຜູ້ຊື່ວ່າສຸນທະຣີ
ເຊິ່ງລຸດພົ້ນແລ້ວ ບໍ່ມີອຸປະທິກິເລດ
ປາສະຈາກຣາຄະ ບໍ່ເກາະກ່ຽວ
ບໍ່ມີອາສະວະ ເຮັດກິດສຳເລັດແລ້ວມາເຝົ້າຢູ່
[໑໑໖]  ຂ້າແດ່ພຣະມະຫາວີຣະ ສຸນທະຣີສາວິກາຂອງພຣະອົງ
ອອກຈາກນະຄອນພາຣານະສີ ມາເຝົ້າພຣະອົງ
ຖວາຍອະພິວາດພຣະບາດທັງສອງຢູ່
[໑໑໗]  ພຣະອົງເປັນພຣະພຸດທະເຈົ້າເປັນສາດສະດາຂອງຂ້າພຣະອົງ
ຂ້າແດ່ພຣະຜູ້ຊົງເປັນພາມ
ຂ້າພຣະອົງເປັນທິດາເຊິ່ງເກີດແຕ່ພຣະອຸຣະ
ເກີດແຕ່ພຣະໂອດຂອງພຣະອົງ
ບໍ່ມີອາສະວະ ເຮັດກິດສຳເລັດແລ້ວ

(ລຳດັບນັ້ນ ພຣະສາດສະດາເມື່ອຈະຊົມເຊີຍການມາເຝົ້າຂອງນາງ ຈຶ່ງໄດ້ຕັດວ່າ)

[໑໑໘]  ສຸນທະຣີຜູ້ຈະເລີນ ທ່ານມາດີແລ້ວ ມາບໍ່ຊົ່ວເລີຍ
ຍ້ອນວ່າຜູ້ທີ່ເຝິກແລ້ວແນວນີ້ ປາສະຈາກຣາຄະ
ບໍ່ເກາະກ່ຽວ ບໍ່ມີອາສະວະ
ເຮັດກິດສຳເລັດແລ້ວ ຍ່ອມມາຂາບພຣະບາດພຣະສາດສະດາ

# ໕. ສຸພາກຳມາຣະທິຕຸເຖຣີຄາຖາ
## ພາສິດຂອງພຣະສຸພາກຳມາຣະທິດາເຖຣີ

ພຣະສຸພາກຳມາຣະທິດາເຖຣີ(ໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໓໓໙] ຍ້ອນແຕ່ກ່ອນ ເຮົາຍັງສາວນຸ່ງຫົ່ມຜ້າສະອາດ
ໄດ້ຟັງທຳແລ້ວ ເຮົານັ້ນບໍ່ຜະໝາດ
ຈຶ່ງໄດ້ຕັດສະຣູ້ສັດຈະທຳ

[໓໔໐] ດັ່ງນັ້ນ ເຮົາຈຶ່ງບໍ່ຍິນດີຢ່າງຍິ່ງໃນກາມທັງປວງ
ເຫັນໄພໃນກາຍຂອງຕົນ ຍິນດີສະເພາະເນກຂຳມະທໍ່ນັ້ນ

[໓໔໑] ລະໝູ່ຍາດ ຂ້າທາດ ກຳມະກອນ ເຮືອນ ໄຮ່ນາ ຄວາມມັ່ງຄັ່ງ
ແລະກອງໂພຄະທີ່ໜ້າອອນຊອນ ທີ່ເຂົາບັນເທີງກັນຫຼາຍ

[໓໔໒] ລະສົມບັດບໍ່ແມ່ນໜ້ອຍ ອອກບວດດ້ວຍສັດທາແບບນີ້
ໃນພຣະສັດທຳທີ່ພຣະພຸດທະເຈົ້າຊົງປະກາດດີແລ້ວ

[໓໔໓] ຂໍ້ທີ່ເຮົາລະເງິນຄຳແລ້ວຍັງກັບ (ຍິນດີເງິນຄຳ) ອີກນັ້ນ
ບໍ່ສົມຄວນແກ່ເຮົາ ຍ້ອນເຮົາປາຖະໜາຄວາມບໍ່ມີຫ່ວງກັງວົນ

[໓໔໔] ຍ້ອນເງິນຄຳ ບໍ່ແມ່ນມີໄວ້ເພື່ອຄວາມຕັດສະຣູ້ ເພື່ອຄວາມສະງົບໃຈ
ເງິນຄຳນັ້ນບໍ່ສົມຄວນແກ່ສະມະນະ ທັງບໍ່ແມ່ນອະຣິຍະຊັບ

[໓໔໕] ອັນໜຶ່ງ ເງິນຄຳນີ້ ເຮັດໃຫ້ເກີດຄວາມໂລບ ນຳມາເຊິ່ງຄວາມມົວເມົາ
ໃຫ້ເກີດຄວາມລຸ້ມຫຼົງ ເປັນເຄື່ອງເພີ່ມພູນຄວາມກຳໜັດຍິນດີ
ມີຄວາມຣະແວງ ມີຄວາມຫຍຸ້ງຍາກ
ແລະໃນເງິນຄຳນັ້ນບໍ່ມີຄວາມໝັ້ນຍືນໝັ້ນຄົງເລີຍ

[໓໔໖] ອັນໜຶ່ງ ຜູ້ຄົນຫຼວງຫຼາຍຍິນດີໃນຊັບນັ້ນ ຊື່ວ່າເປັນຜູ້ຜະໝາດ
ມີໃຈເສົ້າໝອງ ຕ່າງຜິດໃຈຕໍ່ກັນແລະກັນ
ກະທຳຄວາມບາດໝາງໃຈກັນຜິດກັນຖຽງກັນ

[໓໔໗] ການຂ້າກັນ ການຖືກຄຸມຂັງ ການຕ້ອງໂທດມີຕັດມືເປັນຕົ້ນ
ຄວາມເສື່ອມ ຄວາມໂສກເສົ້າ ຮ່ຳໄຮ

ຄວາມພິນາດຫຼວງຫຼາຍຂອງຄົນທັງຫຼາຍ
ຜູ້ເນື່ອງຢູ່ໃນກາມທັງຫຼາຍ ກໍເບິ່ງເຫັນກັນຢູ່

[໓໔໗] ທ່ານທັງຫຼາຍເປັນຍາດກໍຄືເປັນສັດຕູ
ຍ້ອນເຫດໃດ ຈຶ່ງດຶງຮັ້ງເຮົານັ້ນໄວ້ໃນກາມທັງຫຼາຍນໍ
ທ່ານທັງຫຼາຍຈົ່ງຮູ້ເທີ້ນວ່າ ເຮົາເຫັນໄພໃນກາມທັງຫຼາຍຈຶ່ງບວດ

[໓໔໙] ອາສະວະທັງຫຼາຍ ຍ່ອມບໍ່ໝົດໄປຍ້ອນເງິນແລະຄຳ
ກາມທັງຫຼາຍ ເປັນສັດຕູ ເປັນຜູ້ຂ້າ
ເປັນຂ້າເສິກ ເປັນດັ່ງລູກສອນສຽບໄວ້

[໓໕໐] ທ່ານທັງຫຼາຍເປັນຍາດກໍຄືເປັນສັດຕູ
ຍ້ອນເຫດໃດ ຈຶ່ງດຶງຮັ້ງເຮົາໄວ້ໃນກາມທັງຫຼາຍ
ທ່ານທັງຫຼາຍຈົ່ງຮູ້ເທີ້ນວ່າ
ເຮົາບວດຫົວໂລ້ນຄອງຜ້າສັງຄາຕິແລ້ວ

[໓໕໑] ກ້ອນເຂົ້າທີ່ຈະເພິ່ງລຸກຂຶ້ນຢືນຮັບ ການທ່ຽວສະແຫວງຫາ
ການນຸ່ງຫົ່ມຜ້າບັງສຸກຸນ
ແລະບໍຣິຂານເຄື່ອງອາໄສຂອງນັກບວດຜູ້ບໍ່ມີເຮືອນ
ນີ້ແລ້ວເປັນຂອງເໝາະສົມສຳລັບເຮົາ

[໓໕໒] ກາມທັງຫຼາຍທັງທີ່ເປັນຂອງທິບ ແລະທີ່ເປັນຂອງມະນຸດ
ເຫຼົ່າທ່ານຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ຄາຍສາແລ້ວ
ທ່ານເຫຼົ່ານັ້ນ ນ້ອມໄປແລ້ວໃນຖານະອັນປອດໂປ່ງ
ບັນລຸສຸກອັນບໍ່ຫວັ່ນໄຫວແລ້ວ

[໓໕໓] ເຮົາຢ່າຮ່ວມດ້ວຍກາມທັງຫຼາຍເຊິ່ງຊ່ອຍອັນໃດບໍ່ໄດ້ເລີຍ
ກາມທັງຫຼາຍເປັນສັດຕູ ເປັນຜູ້ຂ້າ
ອຸປະມາດ້ວຍກອງໄຟ ນຳແຕ່ທຸກມາໃຫ້

[໓໕໔] ກາມນັ້ນ ເປັນສະພາວະທີ່ບຽດບຽນ ມີໄພ
ເປັນໄປກັບດ້ວຍຄວາມຄັບແຄ້ນ
ເປັນສ້ຽນໜາມ ແລະກາມນັ້ນ ມີສະພາວະໜັກມຸ້ນ
ບໍ່ຮຽບຮ້ອຍ ເປັນເຫດລຸ້ມຫຼົງຫຼາຍ

[໓໒໒] ເປັນເຫດຂັດຂ້ອງ ແລະເປັນສິ່ງທີ່ເປັນຕາຢ້ານ
ການທັງຫຼາຍ ປຽບດ້ວຍງູພິດ
ທີ່ເຫຼົ່າປຸຖຸຊົນທັງຈ້ຳແລະບອດເພີດເພີນກັນຍິ່ງ

[໓໒໓] ປຸຖຸຊົນເຫຼົ່ານັ້ນເປັນຈຳນວນຫຼາຍ
ຂ້ອງຢູ່ແລ້ວດ້ວຍເປືອກຕົມຄືການ ບໍ່ຮູ້ຄວາມຈິງໃນໂລກ
ຍ່ອມບໍ່ຮູ້ຊຶ້ງເຖິງທີ່ສິ້ນສຸດຄວາມເກີດແລະຄວາມຕາຍ

[໓໒໔] ຜູ້ຄົນຫຼວງຫຼາຍພາກັນເດີນທາງໄປທຸກຄະຕິ
ເຊິ່ງມີການເປັນເຫດທັ້ງຫຼາຍ ອັນນຳພະຍາດມາໃຫ້ແກ່ຕົນຢ່າງແນ່ນອນ

[໓໒໕] ການທັງຫຼາຍເປັນເຫດໃຫ້ເກີດສັດຕູ ໃຫ້ເດືອດຮ້ອນ
ນຳຄວາມເສົ້າໝອງມາ ເປັນເຫຍື່ອໃນໂລກ
ເປັນເຄື່ອງຄຸມຂັງ ກ່ຽວເນື່ອງດ້ວຍຄວາມຕາຍ

[໓໒໖] ການທັງຫຼາຍເປັນເຫດໃຫ້ບ້າ ໃຫ້ຈົ່ມເພີ້ ຍ່ຳຍີຈິດ
ຍ້ອນເຮັດໝູ່ສັດໃຫ້ເສົ້າໝອງ
ເພິ່ງເຫັນວ່າ ຄືລອບທີ່ມານຟ້າວດັກໄວ້

[໓໓໐] ການທັງຫຼາຍ ມີໂທດຫາບ່ອນສຸດບໍ່ໄດ້ ມີທຸກຫຼາຍ ມີພິດຫຼາຍ
ມີຄວາມພໍໃຈໜ້ອຍ ເປັນສະໜາມຮົບ ເຮັດກຳຝ່າຍກຸສົນໃຫ້ເຫືອດແຫ້ງລົງ
[໓໓໑] ເຮົານັ້ນລະຄວາມພິນາດເຊິ່ງມີການເປັນເຫດເຊັ່ນນັ້ນໄດ້ແລ້ວ
ຈັກບໍ່ກັບມາຫາມັນອີກ ຍ້ອນວ່າຕັ້ງແຕ່ບວດແລ້ວ
ເຮົາຍິນດີຢ່າງຍິ່ງໃນນິບພານ
[໓໓໒] ຫວັງຄວາມເຢືອກເຢັນ ຈຶ່ງເຮັດສົງຄາມຕໍ່ການທັງຫຼາຍ
ຍິນດີແລ້ວໃນນິບພານເປັນທີ່ສິ້ນສຸດສັງໂຍດ
ຈັກເປັນຜູ້ບໍ່ຜະໝາດຢູ່
[໓໓໓] ຍ່າງຕາມທາງອະຣິຍະມັກມີອົງ ໘ ເຊິ່ງເປັນທາງສາຍຊື່
ບໍ່ເສົ້າໂສກ ປາສະຈາກກິເລດຄືທຸລີ ເປັນທາງປອດໂປ່ງ
ເຊິ່ງເປັນທາງທີ່ເຫຼົ່າທ່ານຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ພາກັນຂ້າມໄປແລ້ວ

(ພຣະຜູ້ມີພຣະພາກເຈົ້າ ຊົງແນະນຳພຣະເຖຣີຜູ້ບັນລຸພຣະອະຣະຫັດຕະຜົນໃນວັນທີ ໘ ຫຼັງຈາກບວດ ຜູ້ນັ່ງເຂົ້າຊານຢູ່ທີ່ເຫງົ້າຕົ້ນໄມ້ແຫ່ງໜຶ່ງ ແກ່ພິກຂຸທັງຫຼາຍ ເມື່ອຈະຊົງສັນເສີນ ຈຶ່ງຕັດຄາຖາເຫຼົ່ານີ້ວ່າ)

[໓໖໔] ທ່ານທັງຫຼາຍ ຈົ່ງເບິ່ງທິດາຂອງຊ່າງຄຳຜູ້ສວຍງາມ
ຜູ້ດຳລົງຢູ່ໃນທຳຜູ້ນີ້ເທີ້ນ
ທ່ານໄດ້ບັນລຸອະຣະຫັດຕະຜົນອັນບໍ່ຫວັ່ນໄຫວ
ເຂົ້າຊານຢູ່ທີ່ເຫງົ້າຕົ້ນໄມ້

[໓໖໕] ມື້ນີ້ເປັນມື້ທີ ໗ ຫຼັງຈາກທ່ານມີສັດທາບວດແລ້ວ
ງາມຍ້ອນບັນລຸພຣະສັດທຳ
ໄດ້ພຣະອຸບົນວັນນາເຖຣີຊ່ອຍແນະນຳແລ້ວ
ບັນລຸວິດຊາ ໓ ລະມັດຈຸມານໄດ້

[໓໖໖] ພິກຂຸນີອົງນີ້ນັ້ນ ເປັນອິດສະຫຼະແກ່ໂຕເອງ
ບໍ່ເປັນໜີ້ ອົບຮົມອິນຊີແລ້ວ
ພາກຈາກກິເລດທີ່ເຄີຍມີໄດ້ໝົດ
ບໍ່ມີອາສະວະ ເຮັດກິດສຳເລັດແລ້ວ

(ພຣະສັງຄີຕິກາຈານໄດ້ກ່າວພາສິດນີ້ໄວ້ວ່າ)

[໓໖໗] ທ້າວສັກກະຜູ້ເປັນໃຫຍ່ກວ່າໝູ່ສັດພ້ອມດ້ວຍໝູ່ເທບ
ພາກັນເຂົ້າໄປຫາພຣະເຖຣີເຊິ່ງເປັນທິດາຂອງຊ່າງຄຳ
ຜູ້ສວຍງາມນັ້ນດ້ວຍລິດຂອງຕົນ ແລ້ວຊົງນະມັດສະການຢູ່

**ວີສະຕິນິບາດ ຈົບ**

# ໑໔. ຕິງສະນິບາດ

## ໑. ສຸພາຊີວະກຳພະວະນິກາເຖຣີຄາຖາ

### ພາສິດຂອງພຣະສຸພາຊີວະກຳພະວະນິກາເຖຣີ

ພຣະສຸພາຊີວະກຳພະວະນິກາເຖຣີ(ໄດ້ເປ່ງອຸທານດ້ວຍພາສິດເຫຼົ່ານີ້ວ່າ)

[໓໖໘] ນັກເລງເຈົ້າຊູ້ຄົນໜຶ່ງໄດ້ຢືນຂວາງກັ້ນພຣະສຸພາພິກຂຸນີ
ເຊິ່ງກຳລັງຍ່າງໄປສວນໝາກມ່ວງຂອງໝໍຊີວົກໂກມາຣະພັດທີ່ໜ້າອອນຊອນ
ພຣະສຸພາພິກຂຸນີໄດ້ເວົ້າກັບຊາຍນັກເລງເຈົ້າຊູ້ນັ້ນວ່າ

[໓໙໙] ເຮົາປະພຶດຜິດອັນໃດຕໍ່ທ່ານນໍ ຈຶ່ງມາຢືນຂວາງກັ້ນເຮົາໄວ້
ທ່ານຜູ້ອາວຸໂສ ຊາຍບໍ່ຄວນຖືກຕ້ອງຍິງນັກບວດເລີຍ
[໔໗໐] ຍ້ອນເຫດໃດ ທ່ານຈຶ່ງຢືນຂວາງກັ້ນເຮົາຜູ້ບໍ່ມີກິເລດເປັນເຫດຍົວະຍຸ
ມີສ່ວນບໍລິສຸດດ້ວຍສິກຂາທີ່ພຣະສຸຄົດເຈົ້າຊົງສະແດງໄວ້
ໃນສາດສະໜາທີ່ຄວນເຄົາລົບແຫ່ງພຣະສາດສະດາຂອງເຮົາ

[໔໗໑] ຍ້ອນເຫດໃດ ທ່ານ ຈຶ່ງມີຈິດຂຸ່ນມົວ ມີຈິດມີກິເລດຄືທຸລີ
ມາຢືນຂວາງກັ້ນເຮົາຜູ້ມີຈິດບໍ່ຂຸ່ນມົວ
ປາສະຈາກກິເລດເປັນເຫດຍົວະຍຸ
ມີຈິດລຸດພົ້ນໃນປັນຈະຂັນທັງປວງ

(ນັກເລງເຈົ້າຊູ້ກ່າວຕອບດ້ວຍພາສິດເຫຼົ່ານີ້ວ່າ)

[໔໗໒] ແມ່ນາງຍັງສາວ ທັງສວຍບໍ່ຊາມເລີຍ
ບັນພະຊາຈັກເຮັດປະໂຫຍດອັນໃດໃຫ້ແມ່ນາງໄດ້ ໂຜດຖິ້ມຜ້າກາສາຍະສາ
ມາເທີ້ນ ເຮົາມາອອນຊອນກັນໃນປ່າທີ່ມີດອກໄມ້ບານເດຍລະດາດເທີ້ນ

[໔໗໓] ແລະໝູ່ໄມ້ຖືກລົມພັດເອົາລະອອງເກສອນດອກໄມ້ຟຸ້ງຂຶ້ນ
ກໍໂຮຍກິ່ນຫອມກະຈາຍໄປທົ່ວ ລະດູນີ້ ເປັນຕົ້ນລະດູຝົນໜ້າສະບາຍ
ມາເທີ້ນ ເຮົາມາອອນຊອນກັນໃນປ່າທີ່ມີດອກໄມ້ບານເດຍລະດາດ

[໔໗໔] ອັນໜຶ່ງ ຕົ້ນໄມ້ທັງຫຼາຍມີດອກບານແລ້ວ
ລົມພັດປິວໄປມາ ຄືຈະມີສຽງຄວນຢູ່
ແມ່ນາງຈັກມີຄວາມຍິນດີອັນໃດ
ຖ້າແມ່ນາງຈັກເຂົ້າປ່າພຽງຜູ້ດຽວ

[໔໗໕] ປ່າໃຫຍ່ມີໝູ່ສັດຮ້າຍອາໄສຢູ່
ເນືອງແໜ້ນໄປດ້ວຍຊ້າງພາຍຕົກມັນ
ແລະຊ້າງພັງ ບໍ່ມີຜູ້ຄົນ ເປັນຕາຢ້ານ
ແມ່ນາງບໍ່ມີເພື່ອນ ຍັງປາຖະໜາຈະເຂົ້າໄປບໍ

[໔໗໖] ແມ່ນາງງາມບໍ່ມີໃຜປຽບ
ແມ່ນາງທ່ອງທ່ຽວໄປ
ຄືຕຸ໊ກຕາທີ່ນາຍຊ່າງຜູ້ຊານສະຫຼາດເຮັດແລ້ວດ້ວຍຄຳສີສຸກ

ງົດງາມດ້ວຍຜ້າສວຍເນື້ອລະອຽດຂອງແຄວ້ນກາສີ
ດັ່ງເທບອັບປະສອນທ່ຽວໄປໃນສວນຈິດລະດາແທ້ນາ

[໓໗໗] ຖ້າເຮົາທັງສອງໄດ້ຢູ່ຮ່ວມກັນໃນກາງປ່າ
ເຮົາຈະຍອມຢູ່ໃນອຳນາດຂອງແມ່ນາງ
ແມ່ນາງຜູ້ມີດວງຕາຢາດຍ້ອຍດັ່ງກິນນະຣີ
ຍ້ອນຄົນທີ່ໜ້າຮັກກວ່າແມ່ນາງສຳລັບເຮົາບໍ່ມີເລີຍ

[໓໗໘] ຖ້າແມ່ນາງເຊື່ອເຮົາ ກໍຈະມີຄວາມສຸກ
ມາເທີ້ນ ມາຄອງເຮືອນກັນ
ແມ່ນາງຈະໄດ້ຢູ່ເທິງຜາສາດທີ່ປາສະຈາກລົມພັດ
ຍິງທັງຫຼາຍຈະຖ້າຮັບໃຊ້ແມ່ນາງ

[໓໗໙] ແມ່ນາງ ຈົ່ງນຸ່ງຫົ່ມຜ້າເນື້ອລະອຽດຂອງແຄວ້ນກາສີ
ຈົ່ງຕົກແຕ່ງຮ່າງກາຍ ໃສ່ມາໄລ ລູບທາບຳລຸງຜິວ
ເຮົາຈະເຮັດເຄື່ອງປະດັບຕ່າງ ໆ ຫຼາຍຊະນິດ
ທີ່ເປັນຄຳແກ້ວມະນີແລະມຸກດາໃຫ້ແມ່ນາງ

[໓໘໐] ແມ່ນາງຂຶ້ນບ່ອນນອນໃຫຍ່ໃໝ່ອ່ຽມ ມີຄ່າຫຼາຍ
ສວຍງາມປູດ້ວຍຜ້າໂກເຊົາຂົນຍາວແລະຜ້າສຳລີ
ຄຸມດ້ວຍຜ້າທີ່ຊັກສະອາດແລ້ວ
ຕົກແຕ່ງດ້ວຍແກ່ນຈັນມີກິ່ນຫອມ

[໓໘໑] ດອກບົວຜຸດພົ້ນນ້ຳ ບໍ່ມີມະນຸດຊົມແລ້ວສັນໃດ
ແມ່ນາງເປັນສາວພົມມະຈາຣີກໍສັນນັ້ນ
ເມື່ອສ່ວນເຮືອນຮ່າງຂອງແມ່ນາງຍັງບໍ່ມີໃຜເຊີຍຊົມເລີຍ
ແມ່ນາງກໍຈັກເຖິງຄວາມຊະຣາຫາຍໄປຊື່ ໆ

(ພຣະສຸພາຊີວະກຳພະວະນິກາເຖຣີຖາມວ່າ)

[໓໘໔] ໃນຮ່າງກາຍທີ່ຈະຕ້ອງແຕກສະຫຼາຍເປັນທຳມະດາ
ເຊິ່ງເຕັມໄປດ້ວຍຊາກສົບ
ມີແຕ່ຈະຮົກປ່າຊ້ານີ້ ມີອັນໃດທີ່ທ່ານເຂົ້າໃຈວ່າເປັນສາຣະ
ຍ້ອນເຫັນສິ່ງໃດ ຈຶ່ງເກີດຕິດໃຈ ຂໍທ່ານໂຜດບອກສິ່ງນັ້ນມາເທີ້ນ

(ນັກເລງເຈົ້າຊູ້ຕອບວ່າ)

[໓໘໓] ຍ້ອນເຫັນດວງຕາຂອງແມ່ນາງ ເໝືອນດວງຕາລູກເນື້ອຊາຍ
ແລະເໝືອນດວງຕາກິນນະຣີທີ່ທ່ຽວຢູ່ຕາມເປີ້ນພູ
ຄວາມຕ້ອງການຄວາມຍິນດີຂອງເຮົາຍິ່ງກຳເຣີບ

[໓໘໔] ຍ້ອນເຫັນດວງຕາຂອງແມ່ນາງອຸປະມາດັ່ງປາຍດອກບົວ
ດວງໜ້າຂອງແມ່ນາງຂາດເປື້ອຝ້າເຮືອງຮອງດັ່ງດວງໜ້າຮູບຄຳ
ຄວາມຕ້ອງການຄວາມປາຖະໜາຂອງເຮົາກໍຍິ່ງກຳເຣີບ

[໓໘໕] ແມ່ນາງຜູ້ມີດວງຕາບໍລິສຸດມີຂົນຕາຍາວ
ແມ່ນເຮົາຈະໄປໄກແສນໄກ
ກໍຈະຍັງຄຶງຣະນຶກເຖິງດວງຕາທັງຄູ່ຂອງແມ່ນາງທີ່ນັ້ນ
ແມ່ນາງຜູ້ມີດວງຕາຢາດຍ້ອຍດັ່ງກິນນະຣີ
ຍ້ອນວ່າສິ່ງອັນໃດອື່ນທີ່ໜ້າຮັກກວ່າດວງຕາຂອງແມ່ນາງສຳລັບເຮົາບໍ່ມີເລີຍ

(ພຣະສຸພາຊີວະກຳພະວະນິກາເຖຣີກ່າວຕອບວ່າ)

[໓໘໖] ທ່ານປາຖະໜາເຮົາຜູ້ເປັນທິດາຂອງພຣະພຸດທະເຈົ້າ
ນັບວ່າປາຖະໜາຈະເດີນທາງຜິດ
ສະແຫວງຫາດວງຈັນເອົາເປັນຂອງຫຼິ້ນ
ຕ້ອງການຈະໂຕນຂຶ້ນພູສິເນຣຸ

[໓໘໗] ຍ້ອນວ່າ ໃນໂລກພ້ອມທັງເທວະໂລກ
ບັດນີ້ ເຮົາບໍ່ມີຄວາມກຳໜັດເລີຍ
ຄວາມກຳໜັດນັ້ນ ເຮົາບໍ່ຮູ້ດອກວ່າເປັນແນວໃດ
ຍ້ອນມັນຖືກເຮົາກຳຈັດສາແລ້ວພ້ອມທັງຮາກດ້ວຍອະຣິຍະມັກ

[໓໘໘] ຄວາມກຳໜັດນັ້ນເຮົາຍົກອອກແລ້ວ
ຄືລົມຫອບເອົາເຊື້ອເພີງອອກຈາກຂຸມຖ່ານໄຟ
ຖືກເຮັດໃຫ້ພິນາດໄປແຕ່ຍອດ ຄືຍົກພາຊະນະທີ່ຕົກລົງໃນຢາພິດອອກໄປ
ຄວາມກຳໜັດນັ້ນ ເຮົາບໍ່ຮູ້ດອກວ່າເປັນແນວໃດ
ຍ້ອນມັນຖືກເຮົາກຳຈັດສາແລ້ວພ້ອມທັງຮາກດ້ວຍອະຣິຍະມັກ

[໓໘໙] ແມ່ຍິງໃດບໍ່ພິຈາລະນາປັນຈະຂັນ ບໍເຂົ້າເຝົ້າພຣະສາດສະດາ

ເຊີນທ່ານປະເລົ້າປະໂລມແມ່ຍິງເຊັ່ນນັ້ນເທີ້ນ
ທ່ານນັ້ນຈະຕ້ອງເດືອດຮ້ອນ
ຍ້ອນອາໄສສຸພາພິກຂຸນີຜູ້ຮູ້ຕາມຄວາມເປັນຈິງນີ້

[໖໘໐] ຍ້ອນສະຕິຂອງເຮົາໝັ້ນຄົງ
ບໍ່ວ່າໃນການດ່າ ການໄຫວ້ ສຸກແລະທຸກ
ຍ້ອນຮູ້ວ່າສັງຂານທີ່ປັດໄຈປຸງແຕ່ງເປັນຂອງບໍ່ງາມ
ໃຈເຮົາຈຶ່ງບໍ່ຕິດຢູ່ໃນພົບ ໓ ທັງໝົດເລີຍ

[໖໘໑] ເຮົານັ້ນເປັນສາວິກາຂອງພຣະສຸຄົດເຈົ້າ
ດຳເນີນໄປດ້ວຍຍານຄືອະຣິຍະມັກປະກອບດ້ວຍອົງ ໘
ຖອນກິເລດຄືລູກສອນສາແລ້ວ ບໍ່ມີອາສະວະ
ຍິນດີຢູ່ແຕ່ໃນເຮືອນວ່າງ

[໖໘໒] ຮູບພາບທີ່ເຮັດດ້ວຍໄມ້ຫຼືໃບລານທີ່ເຂົາບັນຈົງຂຽນໄວ້ສວຍງາມ
ອັນເຂົາມັດໄວ້ດ້ວຍດ້າຍແລະຕຶງໄວ້ດ້ວຍຕະປູ
ເຮັດໃຫ້ຄືກັບຈະຟ້ອນລຳໄດ້ຕ່າງ ໆ ເຮົາເຫັນມາແລ້ວ

[໖໘໓] ເມື່ອຮູບນັ້ນຖືກຮື້ອອກ ປົດດ້າຍແລະຕະປູອອກ
ກໍບົກຜ່ອງ ກະຈັດກະຈາຍ
ແຍກອອກເປັນຕອນ ໆ ບໍ່ເພິ່ງໄດ້ສະພາບທີ່ຊື່ວ່າຮູບ
ບຸກຄົນຈະເພິ່ງເອົາໃຈຈົດຈໍ່ໃນຮູບນັ້ນເຮັດຫຍັງ

[໖໘໔] ຮ່າງກາຍຂອງເຮົານີ້ ກໍປຽບດ້ວຍຮູບພາບນັ້ນ
ເວັ້ນຈາກທຳ°ເຫຼົ່ານັ້ນສາ ກໍເປັນໄປບໍ່ໄດ້
ຮ່າງກາຍເວັ້ນຈາກທຳ°ທັງຫຼາຍສາ ກໍເປັນໄປບໍ່ໄດ້
ບຸກຄົນຈະເພິ່ງເອົາໃຈຈົດຈໍ່ໃນຮ່າງກາຍນັ້ນເຮັດຫຍັງ

[໖໘໕] ຄືບຸກຄົນໄດ້ເຫັນພາບຈິດຕະກຳ
ທີ່ຈິດຕະກອນລະບາຍດ້ວຍຫໍຣະດານ
ເຮັດໄວ້ທີ່ຝາ ໃນຈິດຕະກຳນັ້ນ ທ່ານກໍຍັງເຫັນວິປະຣິດ
ຄວາມສຳຄັນວ່າມະນຸດຂອງທ່ານກໍຂາດປະໂຫຍດ

[໖໘໖] ຄົນບອດ ທ່ານຍັງຈະເຂົ້າໄປຍຶດອັດຕະພາບທີ່ວ່າງເປົ່າ

ຄືພາບລວງຕາທີ່ຜາກົດຕໍ່ໜ້າ
ຄືຕົ້ນໄມ້ຄຳໃນຄວາມຝັນ ຄື ຮູບຂອງມາຍາກົນ
ທີ່ນັກຫຼິ້ນກົນສະແດງທ່າມກາງຝູງຊົນວ່າເປັນຂອງຈິງ

[໓໙໗] ຟອງເປັນດັ່ງຟອງນ້ຳທີ່ຢູ່ກາງດວງຕານັ້ນ
ມີນ້ຳຕາ ມີຂີ້ຕາ ເກີດທີ່ດວງຕານັ້ນ
ແລະສ່ວນຂອງດວງຕາຕ່າງ ໆ ກໍມາລວມກັນ
ຄືກ້ອນຄັ່ງທີ່ຢູ່ຕາມໂພງໄມ້

[໓໙໘] ພຣະສຸພາເຖຣີມີດວງຕາງາມແລະມີໃຈບໍ່ຂ້ອງບໍ່ຕິດໃນດວງຕານັ້ນ
ກໍຄວັກດວງຕາອອກຈາກເບົ້າຕາ
ສົ່ງມອບໃຫ້ຊາຍເຈົ້າຊູ້ຜູ້ນັ້ນທັນທີ
ພ້ອມກັບກ່າວວ່າ
ເຊີນນຳດວງຕານັ້ນໄປເທີ້ນ
ຍ້ອນເຮົາມອບໃຫ້ທ່ານແລ້ວ
[໓໙໙] ທັນໃດນັ້ນເອງ ຄວາມກຳໜັດໃນດວງຕານັ້ນ
ຂອງນັກເລງເຈົ້າຊູ້ນັ້ນກໍຫາຍໄປ
ແລະເຂົາຂໍຂະມາພຣະເຖຣີນັ້ນດ້ວຍຄຳວ່າ
ຂ້າແດ່ແມ່ນາງຜູ້ປະພຶດພົມມະຈັນ
ຂໍຄວາມໂດຍປອດໄພເພິ່ງມີແກ່ແມ່ນາງເທີ້ນ
ຄວາມປະພຶດອະນາຈານແນວນີ້ຈັກບໍ່ມີຕໍ່ໄປອີກແລ້ວ

(ພຣະສຸພາຊີວະກຳພະວະນິກາເຖຣີກ່າວວ່າ)

[໔໐໐] ທ່ານກະທົບຄົນເຊັ່ນເຮົານີ້
ກໍຄືກອດກອງໄຟທີ່ລຸກເປັນແປວ
ຄືຈັບງູມີພິດຮ້າຍ
ທ່ານຂໍໂທດເຮົາ ເພິ່ງມີຄວາມປອດໄພໄດ້ແດ່
[໔໐໑] ພິກຂຸນີນັ້ນພົ້ນຈາກນັກເລງເຈົ້າຊູ້ນັ້ນແລ້ວ
ໄດ້ໄປສູ່ສຳນັກພຣະພຸດທະເຈົ້າຜູ້ປະເສີດ
ໄດ້ຊົມບຸນລັກສະນະອັນປະເສີດ
ຈັກຂຸກໍກັບເປັນປົກກະຕິຄືແຕ່ເກົ່າ

**ຕິງສະນິບາດ ຈົບ**

# ໑໕. ຈັດຕາລີສະນິບາດ

## ໑. ອິສິທາສີເຖຣີຄາຖາ

### ພາສິດຂອງພຣະອິສິທາສີເຖຣີ

(ພຣະສັງຄີຕິກາຈານໄດ້ກ່າວພາສິດເຫຼົ່ານີ້ວ່າ)

[໔໐໔] ໃນເມືອງປາຕະລີບຸດໄດ້ຊື່ວ່າເປັນເມືອງດອກໄມ້
ເປັນແຜ່ນດິນທີ່ຜ່ອງໃສ
ມີພຣະພິກຂຸນີ ຜູ້ຊົງຄຸນນະທຳ
ເປັນກຸນລະທິດາໃນສາກະຍະສະກຸນ ໒ ອົງ

[໔໐໑] ໃນ ໒ ອົງນັ້ນ ອົງໜຶ່ງຊື່ວ່າອິສິທາສີ ອົງທີ ໒ ຊື່ວ່າໂພທີ
ລ້ວນມີສີນສົມບູນ ຍິນດີເຂົ້າຊານ ເປັນພະຫູສູດ ກຳຈັດກິເລດໄດ້ແລ້ວ

[໔໐໒] ທັງສອງອົງນັ້ນທ່ຽວບິນທະບາດ ສັນແລະລ້າງບາດແລ້ວ
ກໍນັ່ງພັກຕາມສະບາຍໃນບ່ອນສະງັດ ໄດ້ເປ່ງຄຳເວົ້າເຫຼົ່ານີ້ຖາມຕອບກັນ

(ພຣະໂພທີເຖຣີຖາມວ່າ)

[໔໐໕] ແມ່ເຈົ້າອິສິທາສີ ແມ່ເຈົ້າເປັນຜູ້ໜ້າເຫຼື້ອມໃສຢູ່
ແມ່ນໄວຂອງແມ່ເຈົ້າກໍຍັງບໍ່ເສື່ອມໂຊມ
ແມ່ເຈົ້າເຫັນໂທດອັນໃດ ຈຶ່ງຂົນຂວາຍໃນເນກຂຳມະນໍ

[໔໐໖] ພຣະອິສິທາສີເຖຣີນັ້ນສະຫຼາດໃນການສະແດງທຳ
ເມື່ອຖືກໄຕ່ຖາມໃນບ່ອນສະງັດ ຈຶ່ງໄດ້ກ່າວຕອບດັ່ງນີ້ວ່າ
ແມ່ເຈົ້າໂພທີ ຂໍແມ່ເຈົ້າຈົ່ງຟັງເຫດທີ່ຂ້ານ້ອຍອອກບວດ

(ຕໍ່ໄປນີ້ເປັນຄຳວິສັດຊະນາ)

[໔໐໗] ໃນນະຄອນອຸດເຊນນີຣາດຊະທານີ
ບິດາຂອງຂ້ານ້ອຍເປັນເສດຖີ ສັງລວມໃນສີນ
ຂ້ານ້ອຍເປັນທິດາຄົນດຽວຂອງທ່ານ
ຈຶ່ງເປັນທີ່ຮັກທີ່ພໍໃຈ ແລະໜ້າອີດູ

[໔໐໗]	ພາຍຫຼັງພວກຄົນສະນິດຂອງຂ້ານ້ອຍ
ທີ່ມີຕະກູນສູງມາຈາກເມືອງສາເກດ
ຂໍຂ້ານ້ອຍວ່າ ເສດຖີມີຣັດຕະນະຫຼາຍ ຂໍຂ້ານ້ອຍ
ບິດາໄດ້ໃຫ້ຂ້ານ້ອຍເປັນສະໃພ້ຂອງເສດຖີນັ້ນ

[໔໐໙]	ຂ້ານ້ອຍຕ້ອງເຂົ້າໄປທຳຄວາມນອບນ້ອມພໍ່ປູ່ແລະແມ່ຍ່າທຸກເຊົ້າແລງ
ຕ້ອງຂາບຕີນດ້ວຍຂະໜ່ອມ ຕາມທີ່ຖືກສັ່ງສອນມາ

[໔໑໐]	ເອື້ອຍນ້ອງສາວ ອ້າຍນ້ອງຊາຍ
ຫຼືບ່າວໄພ່ຂອງສາມີຂ້ານ້ອຍບໍ່ວ່າຄົນໃດ
ຂ້ານ້ອຍເຫັນແລ້ວແມ່ນເທື່ອດຽວ ກໍຢ້ານກົວຕ້ອງໃຫ້ບ່ອນນັ່ງເຂົາ

[໔໑໑]	ຂ້ານ້ອຍຕ້ອງຮັບຮອງເຂົາດ້ວຍເຂົ້າ ນໍ້າ ຂອງຫຍໍ້າ
ແລະສິ່ງຂອງທີ່ຈັດກຽມໄວ້ໃນບ່ອນທີ່ເຂົາເຂົ້າໄປນັ້ນ
ນຳເຂົ້າໄປໃຫ້ ແລະຕ້ອງໃຫ້ຂອງທີ່ສົມຄວນແກ່ເຂົາ

[໔໑໒]	ຂ້ານ້ອຍລຸກຂຶ້ນຕາມເວລາ ເຂົ້າໄປສູ່ເຮືອນສາມີ
ລ້າງມືແລະຕີນທີ່ໃກ້ປະຕູ ປະນົມມືເຂົ້າໄປຫາສາມີ

[໔໑໓]	ຕ້ອງຈັດຫາຫວີ ເຄື່ອງຜັດໜ້າ ຢາຢອດຕາ
ແລະແກ້ວ ແຕ່ງໂຕໃຫ້ສາມີເອງ ຄືກັບຍິງຮັບໃຊ້

[໔໑໔]	ຫຸງເຂົ້າຕົ້ມແກງເອງ ລ້າງພາຊະນະເອງທັງນັ້ນ
ປົນນິບັດສາມີ ເຫມືອນມານດາປົນນິບັດບຸດນ້ອຍຄົນດຽວ

[໔໑໕]	ຈົ່ງຮັກພັກດີ ເຮັດໜ້າທີ່ຄົບຖ້ວນ
ເຊົາຖືເນື້ອຖືໂຕ ດຸໝັ່ນບໍ່ຂີ້ຄ້ານ
ມີສິນແນວນີ້ ສາມີກໍຍັງກຽດຊັງ

[໔໑໖]	ສາມີນັ້ນ ບອກມານດາແລະບິດາວ່າ
ລູກຈັກລາໄປແລ້ວ ລູກບໍ່ຂໍຢູ່ຮ່ວມກັບອິສິທາສີ
ທັງບໍ່ຍອມຢູ່ຮ່ວມເຮືອນຫຼັງດຽວກັນດ້ວຍ
(ມານດາບິດາຂອງເຂົາກ່າວວ່າ)

[໔໑໗]	ຢ່າເວົ້າແນວນີ້ລູກ

ອິສິທາສີເປັນບັນດິດ ສະຫຼາດຮອບຄອບ
ດຸໝັ່ນບໍ່ຂີ້ຄ້ານ ເປັນຫຍັງລູກຈຶ່ງບໍ່ພໍໃຈ

(ສາມີຂອງຂ້ານ້ອຍເວົ້າວ່າ)

[໔໑໗] ອິສິທາສີ ບໍ່ໄດ້ບຽດບຽນອັນໃດລູກດອກ
ແຕ່ລູກບໍ່ຢາກຢູ່ຮ່ວມກັບອິສິທາສີ
ລູກກຽດຊັງ ລູກພໍແລ້ວ ຈັກຂໍລາໄປ

[໔໑໙] ແມ່ຍ່າແລະພໍ່ປູ່ ຟັງຄຳຂອງສາມີຂ້ານ້ອຍນັ້ນແລ້ວ
ໄດ້ຖາມຂ້ານ້ອຍວ່າ ເຈົ້າປະພຶດຜິດອັນໃດ
ເຈົ້າຈຶ່ງຖືກເຂົາປະຖິ້ມ
ຈົ່ງເວົ້າໄປຕາມຄວາມເປັນຈິງໂລດ

(ຂ້ານ້ອຍຕອບວ່າ)

[໔໒໐] ຂ້ານ້ອຍບໍ່ໄດ້ປະພຶດຜິດອັນໃດ ບໍ່ໄດ້ບຽດບຽນເຂົາ
ທັງບໍ່ໄດ້ເວົ້າຄຳຫຍາບຄາຍ ຂ້ານ້ອຍກ້າບໍ
ທີ່ຈະເຮັດສິ່ງທີ່ສາມີກຽດຊັງຂ້ານ້ອຍໄດ້ ຍາແມ່

[໔໒໑] ມານດາບິດາຂອງເຂົານັ້ນ ເສຍໃຈ ຖືກທຸກຄອບງຳ
ຫວັງທະນຸຖະໜອມບຸດ ຈຶ່ງນຳຂ້ານ້ອຍສົ່ງກັບໄປເຮືອນບິດາ
ຂ້ານ້ອຍເປັນຜູ້ຊະນະສິຣິທີ່ສວຍງາມແລ້ວນໍ

[໔໒໒] ພາຍຫຼັງ ບິດາໄດ້ຍົກຂ້ານ້ອຍໃຫ້ແກ່ກຸນລະບຸດ
ຜູ້ລ້ຳລວຍໜ້ອຍກວ່າສາມີຄົນທຳອິດເຄິ່ງໜຶ່ງ
ໂດຍສິນສອດເຄິ່ງໜຶ່ງຈາກສິນສອດທີ່ເສດຖີໃຫ້ຂ້ານ້ອຍຄັ້ງທຳອິດ

[໔໒໓] ຂ້ານ້ອຍຢູ່ໃນເຮືອນສາມີຄົນທີ ໒ ນັ້ນໄດ້ເດືອນດຽວ
ຕໍ່ມາ ເຂົາຂັບໄລ່ຂ້ານ້ອຍເຊິ່ງບຳລຸງປົນເປີຢູ່ຄືທາສີ
ບໍ່ຄິດປະທຸດສະຮ້າຍ ມີສີນສົມບູນ
[໔໒໔] ບິດາຂອງຂ້ານ້ອຍ ບອກບຸຣຸດຜູ້ໜຶ່ງ ທີ່ເຝິກກາຍແລະວາຈາແລ້ວ
ມີໜ້າທີ່ເຝິກຈິດຂອງຊົນເຫຼົ່າອື່ນ ກຳລັງທ່ຽວຂໍທານຢູ່ວ່າ
ເຈົ້າຈົ່ງຖິ້ມຜ້າເກົ່າ ໆ ແລະກະເບື້ອງຂໍທານສາ
ມາເປັນລູກເຂີຍເຮົາເທີ້ນ

[໔໘໕] ແມ່ນບຸຣຸດນັ້ນ ຢູ່ໄດ້ເຄິ່ງເດືອນ ກໍເວົ້າກັບບິດາວ່າ
ໂຜດຄືນຜ້າເກົ່າ ກະເບື້ອງຂໍທານ
ແລະພາຊະນະຂໍທານແກ່ຂ້ານ້ອຍເທີ້ນ
ຂ້ານ້ອຍຈັກໄປຂໍທານຄືເກົ່າ

[໔໘໖] ຄັ້ງນັ້ນ ບິດາມານດາແລະໝູ່ຍາດຂອງຂ້ານ້ອຍທຸກຄົນ
ເວົ້າກັບຄົນຂໍທານນັ້ນວ່າ ເຈົ້າເຮັດຫຍັງບໍ່ໄດ້ໃນບ່ອນນີ້ ຟ້າວບອກມາ
ທ່ານຈັກເຮັດກິດນັ້ນແທນເຈົ້າເອງ

[໔໘໗] ເຂົາຖືກບິດາມານດາແລະໝູ່ຍາດຂອງຂ້ານ້ອຍຖາມແນວນີ້ແລ້ວ
ຈຶ່ງເວົ້າວ່າ ເຖິງໂຕຂ້ານ້ອຍຈະເປັນໃຫຍ່ແລະເປັນອິດສະຫຼະ
ຂ້ານ້ອຍພໍແລ້ວ ບໍ່ມີປະໂຫຍດອັນໃດທີ່ຈະຢູ່ຮ່ວມກັບອິສິທາສີ
ຂ້ານ້ອຍບໍ່ຂໍຢູ່ຮ່ວມກັບອິສິທາສີ
ທັງບໍ່ຂໍຢູ່ຮ່ວມເຮືອນຫຼັງດຽວກັບທ່ານ

[໔໘໘] ຊາຍຂໍທານນັ້ນຖືກບິດາປ່ອຍກໍໄປ
ແມ່ນຂ້ານ້ອຍຢູ່ຄົນດຽວ ກໍຄິດວ່າ
ຈະລາບິດາມານດາໄປຕາຍຫຼືໄປບວດສາ

[໔໘໙] ຂະນະນັ້ນ ພຣະແມ່ເຈົ້າຊິນທັດຕາເຖຣີ
ຜູ້ຊົງວິໄນ ເປັນພະຫູສູດ ມີສີນສົມບູນ
ທ່ຽວບິນທະບາດມາຍັງຕະກູນບິດາ

[໔໙໐] ຂ້ານ້ອຍເຫັນທ່ານ ຈຶ່ງລຸກໄປຈັດບ່ອນນັ່ງຂອງຂ້ານ້ອຍຖວາຍທ່ານ
ແລະເມື່ອທ່ານນັ່ງຮຽບຮ້ອຍແລ້ວ
ຂ້ານ້ອຍກໍຂາບຕີນແລ້ວຖວາຍອາຫານ

[໔໙໑] ຂ້ານ້ອຍລ້ຽງດູທ່ານດ້ວຍເຂົ້ານ້ຳ ຂອງຄວນຫຍ້ຳ
ແລະສິ່ງຂອງທີ່ຈັດໄວ້ໃນເຮືອນນັ້ນໃຫ້ອີ່ມໜຳສຸກສະບາຍ
ຈຶ່ງຮຽນທ່ານວ່າ ຂ້ານ້ອຍປະສົງຈະບວດ ຂ້ານ້ອຍ
[໔໙໒] ລຳດັບນັ້ນ ບິດາເວົ້າກັບຂ້ານ້ອຍວ່າ
ລູກເອີຍ ລູກຈົ່ງປະພຶດທຳໃນເຮືອນນີ້ກໍແລ້ວກັນ
ຈົ່ງລ້ຽງດູສະມະນະແລະພາມທັງຫຼາຍ
ໃຫ້ອີ່ມໜຳດ້ວຍເຂົ້າແລະນ້ຳເທີ້ນ

[໔໓໓] ຂະນະນັ້ນ ຂ້ານ້ອຍຮ້ອງໄຫ້ປະນົມມືເວົ້າກັບບິດາວ່າ
ຄວາມຈິງ ລູກເຮັດບາບມາຫຼາຍແລ້ວ
ລູກຈັກຊໍາຮະກໍານັ້ນໃຫ້ສໍາເລັດສິ້ນສຸດກັນສາ

[໔໓໔] ຄັ້ງນັ້ນ ບິດາຈິ່ງໃຫ້ພອນຂ້ານ້ອຍວ່າ
ຂໍໃຫ້ລູກບັນລຸອະຣະຫັດຕະມັກ ອະຣະຫັດຕະຜົນອັນເລີດ
ແລະຈິ່ງໄດ້ນິບພານທີ່ພຣະພຸດທະເຈົ້າຜູ້ປະເສີດສຸດກວ່າເທວະດາແລະມະນຸດ
ຊົງກະທໍາໃຫ້ແຈ້ງເທີ້ນ

[໔໓໕] ຂ້ານ້ອຍຂາບລາມານດາບິດາແລະໝູ່ຍາດທຸກຄົນ
ບວດໄດ້ ໗ ມື້ ກໍໄດ້ບັນລຸວິດຊາ ໓

[໔໓໖] ຮູ້ຣະນຶກຊາດໄດ້ ໗ ຊາດ ຈັກບອກກໍາທີ່ມີຜົນວິບາກແກ່ແມ່ເຈົ້າ
ຂໍແມ່ເຈົ້າໂຜດສັງລວມໃຈຟັງວິບາກກໍານັ້ນເທີ້ນ
[໔໓໗] ຊາດກ່ອນ ຂ້ານ້ອຍເປັນຊ່າງຄໍາໃນເມືອງເອຣະກະກັດສະ
ມີຊັບຫຼາຍ ມົວເມົາໃນໄວໜຸ່ມ ໄດ້ເປັນຊູ້ກັບພັນລະຍາຜູ້ອື່ນ

[໔໓໘] ຂ້ານ້ອຍນັ້ນຕາຍຈາກຊາດນັ້ນແລ້ວ
ຕ້ອງໄປມົກໄໝ້ຢູ່ໃນນະຮົກເປັນເວລາດົນ ຖືກໄຟນະຮົກເຜົາແລ້ວ
ເມື່ອພົ້ນຈາກນະຮົກນັ້ນແລ້ວ ກໍເກີດໃນທ້ອງນາງລີງ

[໔໓໙] ພໍເກີດໄດ້ ໗ ມື້ ວານອນໃຫຍ່ ຈ່າຝູງ ກໍກັດອະໄວຍະວະສືບພັນ
ນີ້ເປັນຜົນກໍາທີ່ຂ້ານ້ອຍເປັນຊູ້ກັບພັນລະຍາຜູ້ອື່ນ

[໔໔໐] ຂ້ານ້ອຍນັ້ນຕາຍຈາກກໍາເນີດວານອນນັ້ນແລ້ວ
ເກີດໃນທ້ອງແມ່ແບ້ຕາບອດ ແລະເປັນງ່ອຍຢູ່ໃນປ່າ ແຄວ້ນສິນທຸ
[໔໔໑] ພໍອາຍຸໄດ້ ໑໘ ປີ ພາເດັກຂຶ້ນຫຼັງໄປ
ຖືກເດັກຕັດອະໄວຍະວະສືບພັນ ປ່ອຍເປັນພະຍາດ
ໝູ່ໜອນຊອນໄຊທີ່ອະໄວຍະວະສືບພັນ
ນີ້ເປັນຜົນກໍາທີ່ຂ້ານ້ອຍເປັນຊູ້ກັບພັນລະຍາຜູ້ອື່ນ
[໔໔໘] ຂ້ານ້ອຍນັ້ນຕາຍຈາກກໍາເນີດແບ້ນັ້ນແລ້ວ
ກໍເກີດໃນທ້ອງງົວແມ່ຂອງພໍ່ຄ້າງົວ
ເປັນງົວນ້ອຍມີຂົນແດງດັ່ງນໍ້າຄັ່ງ
ອາຍຸ ໑໘ ເດືອນກໍຖືກຕອນ

[໔໔໓] ຂ້ານ້ອຍຖືກເຂົາໃຊ້ໃຫ້ລາກໄຖແລະຫາມກວຽນ
ປ່ວຍເປັນພະຍາດຕາບອດ ມີຄວາມລຳບາກ
ນີ້ເປັນຜົນກຳທີ່ຂ້ານ້ອຍເປັນຊູ້ກັບພັນລະຍາຜູ້ອື່ນ

[໔໔໔] ຂ້ານ້ອຍນັ້ນຕາຍຈາກກຳເນີດງົວນັ້ນແລ້ວ
ເກີດໃນທ້ອງສາວໃຊ້ຂ້າງຖະໜົນໃນພຣະນະຄອນ
ເປັນຍິງກໍບໍ່ແມ່ນ ເປັນຊາຍກໍບໍ່ແມ່ນ
ນີ້ເປັນຜົນກຳທີ່ຂ້ານ້ອຍເປັນຊູ້ກັບພັນລະຍາຜູ້ອື່ນ

[໔໔໕] ອາຍຸ ໓໐ ປີກໍຕາຍ
ມາເກີດເປັນເດັກຍິງ
ໃນຕະກູນຊ່າງກວຽນທີ່ເຂັນໃຈ
ມີໂພຄະຊັບໜ້ອຍ
ມີເຈົ້າໜີ້ຫຼວງຫຼາຍ

[໔໔໖] ເມື່ອໜີ້ພອກພູນທັບຖົມຫຼາຍຂຶ້ນ
ແຕ່ນັ້ນ ນາຍກອງກວຽນກໍຢຶດເອົາຊັບສົມບັດແລ້ວ
ດຶງລາກຂ້ານ້ອຍນັ້ນຜູ້ກຳລັງຮ່ຳໄຮຢູ່ອອກຈາກເຮືອນຂອງສະກຸນ

[໔໔໗] ພາຍຫຼັງ ບຸດຂອງນາຍກອງກວຽນນັ້ນຊື່ຄິຣິທາດ
ເຫັນຂ້ານ້ອຍເປັນສາວລຸ້ນອາຍຸ ໑໖ ປີ
ກໍມີຈິດປະຕິພັດ ຈຶ່ງຂໍໄປເປັນພັນລະຍາ

[໔໔໘] ແຕ່ນາຍຄິຣິທາດນັ້ນ ມີພັນລະຍາຢູ່ກ່ອນຄົນໜຶ່ງ
ເປັນຄົນມີສິນ ມີຄຸນນະທຳ ແລະມີຊື່ສຽງ
ຮັກແພງສາມີຢ່າງດີຍິ່ງ ຂ້ານ້ອຍໄດ້ເຮັດໃຫ້ສາມີກຽດຊັງນາງ

[໔໔໙] ຂໍ້ທີ່ສາມີທັງຫຼາຍ ປະຮ້າງຂ້ານ້ອຍ
ເຊິ່ງປົບນິບັດຢູ່ເໝືອນສາວໃຊ້ໄປ
ກໍເປັນຜົນກຳທີ່ຂ້ານ້ອຍນັ້ນກະທຳແລ້ວໃນຄັ້ງນັ້ນ
ຂ້ານ້ອຍສິ້ນສຸດກຳນັ້ນແລ້ວ

**ຈັດຕາລີສະນິບາດ ຈົບ**

# ໑໖. ມະຫານິບາດ

## ໑. ສຸເມທາເຖຣີຄາຖາ

### ພາສິດພຣະສຸເມທາເຖຣີ

ຮູ້ວ່າ ພຣະສຸເມທາເຖຣີໄດ້ກ່າວພາສິດເຫຼົ່ານີ້ວ່າ

[໔໕໐] ເຮົາເປັນທິດາຂອງພຣະອັກຄະຣະມະເຫສີ
ພຣະເຈົ້າໂກນຈະນະຄອນມັນຕາວະດີ ຊື່ວ່າ ສຸເມທາ
ຜູ້ທີ່ພຣະອະຣິຍະເຈົ້າທັງຫຼາຍຜູ້ເຮັດຕາມຄໍາສັ່ງສອນ
ເຮັດໃຫ້ເກີດເຫຼື້ອມໃສແລ້ວ

[໔໕໑] ເຈົ້າຍິງສຸເມທາມີສີນ ກ່າວທໍາໄດ້ວິຈິດ
ເປັນພະຫູສູດ ຖືກແນະນໍາໃນຄໍາສັ່ງສອນຂອງພຣະພຸດທະເຈົ້າ
ເຂົ້າເຝົ້າພຣະຊະນົກແລະພຣະຊົນນີ ຂາບທູນວ່າ
ຂໍພຣະຊະນົກພຣະຊົນນີທັງ ໒ ພຣະອົງ
ໂຜດຕັ້ງພຣະທະໄທສະດັບຄໍາຂອງລູກ

[໔໕໒] ລູກຍິນດີຢ່າງຍິ່ງໃນນິບພານ
ພົບເຖິງແມ່ນວ່າຈະເປັນທິບກໍບໍ່ໝັ້ນຍືນ
ຈະກ່າວໄປຫຍັງເຖິງກາມທັງຫຼາຍເຊິ່ງເປັນຂອງວ່າງເປົ່າ
ມີຄວາມຍິນດີໜ້ອຍ ມີຄວາມຄັບແຄ້ນຫຼາຍ

[໔໕໓] ກາມທັງຫຼາຍເຜັດຮ້ອນ ປຽບດ້ວຍງູພິດ
ທີ່ພວກຄົນຈ໊າໝົກມຸ້ນຢູ່
ພວກຄົນຈ໊າເຫຼົ່ານັ້ນແອອັດກັນໃນນະຣົກ
ຕ້ອງປະສົບທຸກເດືອດຮ້ອນຢູ່ເປັນເວລາດົນນານ

[໔໕໔] ພວກຄົນຈ໊າບໍ່ສັງລວມກາຍວາຈາແລະໃຈ ເຮັດແຕ່ຄວາມຊົ່ວ
ພອກພູນແຕ່ຄວາມຊົ່ວຍ່ອມເສົ້າໂສກໃນອະບາຍທຸກເມື່ອ
[໔໕໕] ພວກຄົນຈ໊າເຫຼົ່ານັ້ນມີປັນຍາຊາມ ບໍ່ມີຄວາມຄິດ
ຍິນດີແລ້ວໃນທຸກແລະເຫດໃຫ້ເກີດທຸກ
ບໍ່ຮູ້ສັດຈະທໍາ ໔ ທີ່ພຣະອະຣິຍະສະແດງຢູ່ ຈຶ່ງຮູ້ອະຣິຍະສັດບໍ່ໄດ້

[໔໕໖] ຂ້າແດ່ແມ່ເຈົ້າ ຄົນຈຳເຫຼົ່າໃດເມື່ອບໍ່ຮູ້ສັດຈະທັງຫຼາຍ
ທີ່ພຣະພຸດທະເຈົ້າຜູ້ປະເສີດຊົງສະແດງໄວ້ແລ້ວ
ຍັງຊົມຊື່ນພົບ ພໍໃຈເກີດ ໃນໝູ່ເທບ
ຄົນຈຳເຫຼົ່ານັ້ນມີຢູ່ເປັນຈຳນວນຫຼາຍໃນໂລກນີ້

[໔໕໗] ຄວາມເກີດໃນໝູ່ເທບໃນພົບທີ່ບໍ່ທ່ຽງ ເປັນສະພາວະທີ່ບໍ່ໝັ້ນຍືນ
ພວກຄົນຈຳຍ່ອມບໍ່ສະດຸ້ງຢ້ານຕໍ່ການທີ່ຈະຕ້ອງເກີດຢູ່ປະຈຳ ໆ

[໔໕໘] ສັດທັງຫຼາຍຍ່ອມໄດ້ອະບາຍ ໔ ກັນງ່າຍ
ສ່ວນຄະຕິ ໔ ໄດ້ກັນລຳບາກ
ເຫຼົ່າສັດທີ່ເຂົ້າເຖິງອະບາຍ ໃນນະຮົກບໍ່ມີການບວດເດີ ຂ້ານ້ອຍ

[໔໕໙] ຂໍພຣະຊະນົກພຣະຊົນນີທັງ ໔ ພຣະອົງ
ຊົງອະນຸຍາດໃຫ້ລູກບວດໃນພຣະທຳວິໄນຂອງພຣະທົດສະພົນເທີ້ນຂ້ານ້ອຍ
ລູກຈັກຂົນຂວາຍໜ້ອຍ ພາກພຽນເພື່ອລະຊາດແລະມໍລະນະ

[໔໖໐] ກາຍທີ່ມີໂທດຄືກາຍທີ່ຂາດສາລະເຊິ່ງພວກຄົນຈຳຊົມຊື່ນນັກໜາ
ຈະມີປະໂຫຍດອັນໃດໃນພົບ
ຂໍທັງ ໔ ພຣະອົງຊົງອະນຸຍາດເທີ້ນ
ລູກຈັກບວດເພື່ອດັບພະວະຕັນຫາ[១]

[໔໖໑] ຄວາມອຸບັດຂຶ້ນແຫ່ງພຣະພຸດທະເຈົ້າທັງຫຼາຍລູກໄດ້ແລ້ວ
ອັກຂະນະ[៤] ລູກກໍເວັ້ນແລ້ວ
ຂະນະລູກກໍໄດ້ແລ້ວ
ລູກຈິ່ງຈະບໍ່ທຳລາຍສີນແລະພົມມະຈັນຕະຫຼອດຊີວິດ

[໔໖໔] ເຈົ້າຍິງສຸເມທາຂາບທູນພຣະຊະນົກພຣະຊົນນີແນວນີ້ວ່າ
ຕາບໃດທີ່ລູກຍັງເປັນຄະລືຫັດຈັກບໍ່ຍອມກິນອາຫານ
ເຖິງຈະຕາຍກໍຍອມຂ້ານ້ອຍ

[໔໖໓] ພຣະຊົນນີຂອງພຣະນາງສຸເມທານັ້ນຊົງເປັນທຸກ ຊົງກັນແສງ
ແລະພຣະຊະນົກຂອງນາງມີພຣະພັກນອງດ້ວຍອັດສຸຊົນ
ທັງ ໔ ພຣະອົງຊົງພະຍາຍາມກ້ຽວກ່ອມພຣະນາງສຸເມທານັ້ນ
ເຊິ່ງຟຸບລົງທີ່ພື້ນດິນ ທີ່ພື້ນຜາສາດວ່າ

[໔໖໔] ລຸກຂຶ້ນເທີ້ນ ລູກຮັກ ຈະເສົ້າໂສກໄປເຮັດຫຍັງ
ພໍ່ແມ່ໄດ້ຍົກລູກໃຫ້ພຣະເຈົ້າອະນິກະຣັດ
ຜູ້ຊົງສະງ່າງາມໃນພຣະນະຄອນວາຣະນະວະດີແລ້ວ

[໔໖໕] ລູກຈັກເປັນເອກອັກຄະຣະມະເຫສີຂອງພຣະເຈົ້າອະນິກະຣັດ
ສິນ ພິມມະຈັນ ບັນພະຊາເຮັດໄດ້ຍາກເດີ ລູກຮັກ

[໔໖໖] ອຳນາດໃນແຄວ້ນຂອງພຣະເຈົ້າອະນິກະຣັດ ຊັບ
ຄວາມເປັນໃຫຍ່ ໂພຄະ ສຸກໃນຣາດຊະສະກຸນນີ້
ຖ້າລູກປາຖະໜາແລ້ວ ກໍຈັກຢູ່ໃນເງື້ອມມືຂອງລູກ
ລູກກໍຍັງເປັນສາວ ຈົ່ງບໍຣິໂພກການທັງຫຼາຍເທີ້ນ
ລູກຈົ່ງວິວາສາເທີ້ນລູກເອີຍ

[໔໖໗] ລຳດັບນັ້ນ ເຈົ້າຍິງສຸເມທາຂາບທູນພຣະຊະນົກພຣະຊົນນີນັ້ນ
ແນວນີ້ວ່າ ອຳນາດເປັນຕົ້ນເຊັ່ນນີ້ຈົງຢ່າມີເລີຍ
ຍ້ອນພົບທາສາຣະບໍ່ໄດ້ ລູກຂໍບວດຫຼືຕາຍທີ່ນັ້ນ
ແຕ່ລູກບໍ່ຍອມວິວາແນ່ນອນ

[໔໖໘] ກາຍທີ່ເປື່ອຍເນົ່າຄືໝູ່ໜອນ ບໍ່ສະອາດ
ມີກິ່ນເໝັນຟຸ້ງໄປ ເປັນຕາຢ້ານ
ເປັນຄືຖົງໜັງ ບັນຈຸສົບ ເຕັມດ້ວຍຂອງບໍ່ສະອາດ
ໄຫຼອອກຢູ່ເນືອງ ໆ ເຊິ່ງຄົນຈ໊າຢຶດຖືຢູ່

[໔໖໙] ລູກຮູ້ຢູ່ວ່າຮ່າງກາຍນັ້ນປະຕິກູນຄືໝູ່ໜອນ
ຖືກສາບໄວ້ດ້ວຍຊີ້ນແລະເລືອດ
ເປັນບ່ອນຢູ່ຂອງໝູ່ໜອນ ເປັນເຫຍື່ອຂອງແຮ້ງກາ
ເປັນຫຍັງພຣະອົງຈຶ່ງພຣະຣາດຊະທານຊາກສົບ
ແກ່ພຣະຣາຊາພຣະອົງນັ້ນຂ້ານ້ອຍ

[໔໗໐] ບໍ່ຊ້າຮ່າງກາຍທີ່ປາສະຈາກວິນຍານ
ຖືກໝູ່ຍາດເຊິ່ງພາກັນກຽດຊັງ
ປະຖິ້ມໄປຄືຂອນໄມ້ທີ່ເຂົາກໍພາກັນນຳໄປຖິ້ມປ່າຊ້າ

[໔໗໑] ມານດາບິດາຂອງຕົນຍັງກຽດຊັງ

ພາກັນເອົາຊາກສົບນັ້ນໄປຖິ້ມໃຫ້ເປັນອາຫານຂອງສັດອື່ນ ໆ ໃນປ່າຊ້າ
ກັບມາກໍຕ້ອງອາບນ້ຳດຳຫົວ
ຈະກ່າວໄປຫຍັງເຖິງໝູ່ຊົນທົ່ວ ໆ ໄປນໍ

[໕໗໔] ໝູ່ຊົນຍຶດຖືແລ້ວໃນຮ່າງກາຍອັນເປື່ອຍເນົ່າ
ເປັນຊາກສົບ ບໍ່ມີແກ່ນສານ ເປັນຮ່າງຂອງກະດູກແລະເອັນ
ເຕັມໄປດ້ວຍນ້ຳລາຍ ນ້ຳຕາ ແລະອຸດຈາຣະ

[໕໗໕] ຜູ້ໃດເພິ່ງຜ່າຮ່າງກາຍນັ້ນກັບຂ້າງໃນມາໄວ້ຂ້າງນອກ
ຜູ້ນັ້ນກໍຈະທົນກິ່ນເໝັນຂອງຮ່າງກາຍນັ້ນບໍ່ໄດ້
ແມ່ນມານດາຂອງຕົນກໍຍັງກຽດຊັງ

[໕໗໔] ລູກພິຈາລະນາໂດຍອຸບາຍອັນແຍບຄາຍວ່າ
ຂັນ ທາດ ອາຍະຕະນະອັນປັດໄຈປຸງແຕ່ງແລ້ວ
ມີຊາດເປັນມູນເຫດ ເປັນທຸກ ຍ້ອນເຫດໃດ
ຈະເພິ່ງປາຖະໜາການວິວານໍຂ້ານ້ອຍ

[໕໗໕] ຫອກ ໓໐໐ ເຫຼັ້ມໃໝ່ອ່ຽມຈະເພິ່ງຕົກຕ້ອງທີ່ກາຍທຸກ ໆ ມື້
ແລະສຽບແທງຢູ່ເຖິງ ໑໐໐ ປີ ຍັງປະເສີດກວ່າ
ຫາກວ່າຄວາມສິ້ນທຸກ ຈະເພິ່ງມີໄດ້ດ້ວຍອາການແນວນີ້

[໕໗໖] ຜູ້ໃດຮູ້ແຈ້ງຄຳສອນຂອງພຣະສາດສະດາແນວນີ້ແລ້ວ
ເພິ່ງຍອມຮັບການສຽບແທງ ດ້ວຍອາການແນວນັ້ນຍັງປະເສີດກວ່າ
ຍ້ອນສັງສາຣະວັດຂອງຄົນເຫຼົ່ານັ້ນ
ເຊິ່ງຖືກຊະຣາພະຍາທິແລະມໍລະນະບຽດບຽນຢູ່ປະຈຳ ໆ ຍາວນານ

[໕໗໗] ໃນຈຳພວກເທວະດາ ມະນຸດ ກຳເນີດສັດເດຍຣັດສານ
ໝູ່ອະສຸຣະກາຍ ເຜດ ແລະສັດນະຣົກ
ການທຳຮ້າຍກັນຍັງຜາກົດຢູ່ຫາປະມານບໍ່ໄດ້

[໕໗໘] ສຳລັບສັດທີ່ເສົ້າໝອງຢູ່ໃນອະບາຍ
ຍັງມີການທຳຮ້າຍກັນຢູ່ຫຼາຍໃນນະຣົກ
ແມ່ນໃນເທວະດາທັງຫຼາຍກໍຊ່ອຍບໍ່ໄດ້
ສຸກອື່ນນອກຈາກສຸກຄືນິບພານບໍ່ມີເລີຍ

[໕໖໙] ຊົນເຫຼົ່າໃດຂົນຂວາຍໃນພຣະທຳວິໄນຂອງພຣະທົດສະພົນ
ມີຄວາມຂົນຂວາຍໜ້ອຍ ພາກພຽນເພື່ອລະຊາດແລະມໍລະນະ
ຊົນເຫຼົ່ານັ້ນຍ່ອມເຖິງນິບພານ

[໕໗໐] ຂ້າແດ່ສົມເດັດພໍ່ ຂ້ານ້ອຍ ມື້ນີ້ແລລູກຈັກອອກບວດ
ໂພຄະຊັບທັງຫຼາຍທີ່ບໍ່ມີແກ່ນສານຈະມີປະໂຫຍດອັນໃດ
ລູກເບື່ອໜ່າຍກາມທັງຫຼາຍແລ້ວ
ເຮັດໃຫ້ສະເໝີດ້ວຍຮາກໝາ ເຮັດໃຫ້ຄືກົກຕານປາຍກຸດ

[໕໗໑] ເຈົ້າຍິງສຸເມທານັ້ນກຳລັງຂາບທູນພຣະຊະນົກຢູ່ແນວນີ້
ພຣະເຈົ້າອະນິກະຣັດຜູ້ໄດ້ຮັບພຣະຣາດຊະທານພຣະນາງສຸເມທານັ້ນ
ມີຂ້າຣາດຊະບໍຣິພານໜຸ່ມຫ້ອມລ້ອມແລ້ວ
ກໍສະເດັດມາເພື່ອເຂົ້າສູ່ວິວາເມື່ອເວລາກະຊັ້ນຊິດ

[໕໗໒] ພາຍຫຼັງ ເຈົ້າຍິງສຸເມທາຮູ້ວ່າພຣະເຈົ້າອະນິກະຣັດສະເດັດມາ
ຈຶ່ງໃຊ້ພຣະຂັນຕັດພຣະເກສາອັນດຳເຫຼື້ອມທີ່ຮວບໄວ້ ອ່ອນສະລວຍ
ຊົງອັດຜາສາດ ເຂົ້າປະຖົມຊານ

[໕໗໓] ເຈົ້າຍິງສຸເມທານັ້ນເຂົ້າຊານ ຢູ່ໃນຜາສາດນັ້ນ
ແລະພຣະເຈົ້າອະນິກະຣັດກໍໄດ້ສະເດັດມາເຖິງພຣະນະຄອນ
ສຸເມທາກໍຈະເລີນອະນິດຈະສັນຍາຢູ່ໃນຜາສາດນັ້ນນັ້ນແລ

[໕໗໔] ເຈົ້າຍິງສຸເມທານັ້ນກຳລັງມະນະສິການ
ແລະພຣະເຈົ້າອະນິກະຣັດຊົງແຕ່ງອົງດ້ວຍແກ້ວມະນີແລະຄຳ
ກໍຟ້າວສະເດັດຂຶ້ນຜາສາດ ຊົງປະຄອງອັນຊະລີ
ອ້ອນວອນພຣະນາງສຸເມທາວ່າ

[໕໗໕] ອຳນາດ ຊັບ ຄວາມເປັນໃຫຍ່ ໂພຄະ ສຸກໃນຣາດຊະສົມບັດ
ນາງຍັງເປັນສາວຢູ່
ຂໍເຊີນບໍຣິໂພກກາມທັງຫຼາຍ
ການສຸກຫາໄດ້ຍາກໃນໂລກ

[໕໗໖] ຣາດຊະສົມບັດເຮົາຍອມສະລະໃຫ້ນາງແລ້ວ
ເຊີນນາງບໍຣິໂພກໂພຄະຊັບ

ຖວາຍທານທັງຫຼາຍເທີ້ນ
ນາງຢ່າຊົງເສຍພຣະຫະໄທເລີຍ
ພຣະຊະນົກພຣະຊົນນີຂອງພຣະນາງຊົງເປັນທຸກ

[໔໗໗] ເຈົ້າຍິງສຸເມທາບໍ່ຕ້ອງການການທັງຫຼາຍ
ປາສະຈາກໂມຫະແລ້ວ
ຈຶ່ງຂາບທູນພຣະເຈົ້າອະນິກະຣັດນັ້ນວ່າ
ຢ່າຊົງເພີດເພີນການເລີຍ
ໂຜດຊົງເຫັນໂທດໃນການທັງຫຼາຍເທີ້ນ ຂ້ານ້ອຍ

[໔໗໘] ພຣະເຈົ້າມັນທາດ ເຈົ້າແຫ່ງທະວີບທັງ ໔
ຊົງເປັນຍອດຜູ້ບໍຣິໂພກການທັງຫຼາຍ
ຍັງບໍ່ທັນຊົງອີ່ມກໍສະເດັດສະຫວັນຄົດໄປແລ້ວ
ທັງຄວາມປາຖະໜາຂອງພຣະອົງ ກໍຍັງບໍ່ເຕັມເລີຍ

[໔໗໙] ເທວະດາຜູ້ເປັນເຈົ້າແຫ່ງຝົນ
ເພິ່ງຫຼັ່ງຝົນຄືຣັດຕະນະ ໗ ລົງມາໂດຍຮອບ ທົ່ວທັງ ໑໐ ທິດ
ຄວາມອີ່ມໃນການທັງຫຼາຍກໍບໍ່ມີ
ນໍຣະຊົນທັງຫຼາຍຍັງບໍ່ອີ່ມເລີຍ ກໍພາກັນຕາຍໄປ

[໔໘໐] ການທັງຫຼາຍປຽບດ້ວຍດາບແລະຫຼາວ
ປຽບດ້ວຍຫົວງູເຫົ່າ ປຽບດ້ວຍຮ່າງກະດູກ
ປຽບດ້ວຍທອນໄຟຕາມເຜົາຢູ່

[໔໘໑] ການທັງຫຼາຍບໍ່ທ່ຽງ ບໍ່ໝັ້ນຍືນ ມີທຸກຫຼາຍ ມີພິດຫຼາຍ
ເປັນເຫດແຫ່ງທຸກ ມີຜົນເປັນທຸກ ຄືກ້ອນເຫຼັກທີ່ລຸກເປັນແປວ

[໔໘໔] ການທັງຫຼາຍປຽບດ້ວຍໝາກໄມ້ ປຽບດ້ວຍຕ່ອນຊີ້ນ
ນໍາທຸກມາໃຫ້ ປຽບດ້ວຍຄວາມຝັນຫຼອກລວງ
ປຽບດ້ວຍຂອງທີ່ຢືມເຂົາມາ
[໔໘໓] ການທັງຫຼາຍປຽບດ້ວຍຫອກແລະຫຼາວ
ເປັນພະຍາດ ເປັນດັງຫົວຝີ ເປັນທຸກ ເປັນຄວາມລໍາບາກ
ເໝືອນຂຸມຖ່ານໄຟ ເປັນເຫດແຫ່ງທຸກ
ເປັນໄພ ເປັນເພດຊະຄາດ

[໔໙໔] ການທັງຫຼາຍມີທຸກຫຼາຍແນວນີ້
ບັນດິດທັງຫຼາຍຈຶ່ງກ່າວວ່າເຮັດອັນຕະລາຍ
ເຊີນພຣະອົງສະເດັດກັບໄປສາເທີ້ນ
ຂ້ານ້ອຍບໍ່ມີຄວາມວາງໃຈໃນພົບຂອງຕົນເອງເລີຍ

[໔໙໕] ເມື່ອໄຟກຳລັງໄໝ້ຫົວຂອງຕົນເອງຢູ່
ຄົນອື່ນຈັກຊ່ອຍອັນໃດຂ້ານ້ອຍໄດ້
ເມື່ອຊະຣາແລະມໍລະນະຕິດຕາມຢູ່
ກໍຄວນພະຍາຍາມກຳຈັດຊະຣາແລະມໍລະນະນັ້ນສາ

[໔໙໖] ເຮົາເຫັນພຣະຊະນົກພຣະຊົນນີ
ແລະພຣະເຈົ້າອະນິກະຣັດສະເດັດຍັງບໍ່ທັນເຖິງພຣະທະວານ
ກໍປະທັບນັ່ງທີ່ພື້ນດິນ ຊົງກັນແສງຢູ່
ຈຶ່ງໄດ້ຂາບທູນດັ່ງນີ້ວ່າ

[໔໙໗] ສັງສາຣະວັດເປັນສະພາວະຍືດຍາວສຳລັບພວກຄົນຈ໊າ
ຜູ້ຮ້ອງໄຫ້ຢູ່ ຢູ່ສະເໝີ ໆ ຍ້ອນບິດາມານດາຕາຍ
ອ້າຍນ້ອງຊາຍຖືກຂ້າ ແລະໂຕເອງຖືກຂ້າ
ໃນສັງສາຣະວັດທີ່ມີເບື້ອງຕົ້ນແລະເບື້ອງປາຍຮູ້ບໍ່ໄດ້ແລ້ວ

[໔໙໘] ຂໍພຣະອົງຊົງໂປດຣະນຶກເຖິງນ້ຳຕາ ນ້ຳນົມ ເລືອດ
ແລະກອງກະດູກຂອງສັດທັງຫຼາຍຜູ້ທ່ອງທ່ຽວໄປມາວ່າຫຼາຍພຽງໃດ
ຍ້ອນຄວາມທີ່ສັງສາຣະວັດມີເບື້ອງຕົ້ນແລະເບື້ອງປາຍຮູ້ບໍ່ໄດ້ແລ້ວ

[໔໙໙] ໂຜດຊົງຣະນຶກເຖິງມະຫາສະມຸດທັງ ໔
ທີ່ພຣະພຸດທະເຈົ້າທັງຫຼາຍ
ຊົງນຳມາປຽບທຽບດ້ວຍນ້ຳຕາ ນ້ຳນົມແລະເລືອດ
ໂຜດຊົງຣະນຶກເຖິງກອງກະດູກໃນກັບໜຶ່ງຂອງບຸກຄົນຄົນໜຶ່ງ
ທຽບທໍ່ພູວິປຸລະບັນພົດ

[໕໐໐] ໂຜດຊົງຣະນຶກເຖິງແຜ່ນດິນໃຫຍ່
ຊົມພູທະວີບທີ່ພຣະພຸດທະເຈົ້າທັງຫຼາຍ
ຊົງນຳມາປຽບທຽບດ້ວຍສັງສາຣະວັດຂອງສັດທີ່ທ່ອງທ່ຽວຢູ່ໃນ
ສັງສາຣະວັດທີ່ມີເບື້ອງຕົ້ນແລະເບື້ອງປາຍຮູ້ບໍ່ໄດ້ແລ້ວ

ແຜ່ນດິນທັງຫຼາຍເຮັດໃຫ້ເປັນກ້ອນທໍ່ເມັດໝາກກະທັນ
ກໍຫຼາຍບໍ່ພໍທີ່ຈຳນວນມານດາບິດາທັງຫຼາຍ

[໕໐໑] ໂຜດຊົງຣະນຶກເຖິງຫຍ້າ ໄມ້ ງ່າໄມ້ ແລະໃບໄມ້
ທີ່ພຣະພຸດທະເຈົ້າທັງຫຼາຍຊົງນຳມາປຽບທຽບ
ຍ້ອນສັງສາຣະວັດມີເບື້ອງຕົ້ນແລະເບື້ອງປາຍຮູ້ບໍ່ໄດ້ແລ້ວ
ປ່ຽງໄມ້ທັງຫຼາຍມີຂະໜາດ ໔ ນິ້ວ
ກໍຫຼາຍບໍ່ພໍທີ່ຈຳນວນບິດາແລະບັນພະບຸລຸດທັງຫຼາຍ

[໕໐໒] ໂຜດຊົງຣະນຶກເຖິງເຕົ່າຕາບອດ
ແລະປ່ອງແອກອັນໝຸນວົນໄປໃນທິດບູນພາແລະທິດອື່ນ ໆ
ໃນມະຫາສະມຸດມາສຸບຫົວເຕົ່າຕາບອດໂຕນັ້ນ
ປຽບທຽບໃນການໄດ້ອັດຕະພາບເປັນມະນຸດ

[໕໐໓] ໂຜດຊົງຣະນຶກເຖິງສະພາວະທີ່ຈະສະຫຼາຍໄປແຫ່ງໂທດຄືກາຍ
ທີ່ບໍ່ມີແກ່ນສານ ເຊິ່ງປຽບດ້ວຍກ້ອນຟອງນ້ຳ
ໂຜດຊົງພິຈາລະນາໃຫ້ເຫັນຂັນທັງຫຼາຍວ່າເປັນສະພາບບໍ່ທ່ຽງ
ໂຜດຊົງຣະນຶກເຖິງນະຣົກທັງຫຼາຍວ່າມີຄວາມຄັບແຄ້ນຫຼາຍ

[໕໐໔] ໂຜດຊົງຣະນຶກເຖິງສັດທັງຫຼາຍທີ່ພາກັນເຮັດປ່າຊ້າໃຫ້ຮົກ
ໃນຊາດນັ້ນ ໆ ຢູ່ບໍ່ສິ້ນສຸດ
ໂຜດຣະນຶກເຖິງໄພຄືແຂ້
ໂຜດຊົງຣະນຶກເຖິງອະຣິຍະສັດ ໔

[໕໐໕] ເມື່ອອະມະຕະນິບພານມີຢູ່
ພຣະອົງຍັງຈະຊົງຕ້ອງການອັນໃດ
ດ້ວຍຂອງເຜັດຮ້ອນ ໕ ຢ່າງທີ່ຊົງດື່ມແລ້ວອີກນໍ
ຍ້ອນວ່າ ຄວາມຍິນດີການທຸກຢ່າງ
ເຜັດຮ້ອນກວ່າຂອງເຜັດຮ້ອນ ໕ ຢ່າງ

[໕໐໖] ເມື່ອອະມະຕະນິບພານມີຢູ່
ພຣະອົງຍັງຈະຊົງຕ້ອງການອັນໃດດ້ວຍການທັງຫຼາຍທີ່ຮ້ອນຮົນອີກນໍ
ຍ້ອນວ່າຄວາມຍິນດີການທຸກຢ່າງອັນໄຟໄໝ້ຮຸ່ງເປັນແປວແລ້ວ
ໃຫ້ເດືອດຮ້ອນ ໃຫ້ຫວັ່ນໄຫວ ເຜົາໃຫ້ຮ້ອນແລ້ວ

[໕໐໗] ເມື່ອການອອກຈາກກາມເຊິ່ງບໍ່ມີຂ້າເສິກມີຢູ່
ພຣະອົງຍັງຈະຊົງຕ້ອງການອັນໃດດ້ວຍກາມທັງຫຼາຍທີ່ມີຂ້າເສິກຫຼາຍ
ກາມທັງຫຼາຍມີໄພຢູ່ທົ່ວໄປ
ຄື ຣາຊະໄພ ອັກຄີໄພ ໂຈຣະໄພ ອຸທະກະໄພ
ແລະອັບປິຍະໄພ໌ ຈຶ່ງຊື່ວ່າມີຂ້າເສິກຫຼາຍ

[໕໐໘] ເມື່ອໂມກຂະທຳມີຢູ່
ພຣະອົງຍັງຈະຊົງຕ້ອງການອັນໃດ
ດ້ວຍກາມທັງຫຼາຍທີ່ມີການຂ້າການຄຸມຂັງນໍ
ຍ້ອນວ່າການຂ້າການຄຸມຂັງມີຢູ່ໃນກາມທັງຫຼາຍ
ສັດທັງຫຼາຍຜູ້ຕ້ອງການກາມຍ່ອມໄດ້ຮັບທຸກທັງຫຼາຍ

[໕໐໙] ທວນໄຟຫຍ້າທີ່ລຸກຮຸ່ງຍ່ອມໄໝ້ຄົນທີ່ຖື
ແລະພວກຄົນທີ່ບໍ່ຍອມປ່ອຍ
ຍ້ອນວ່າກາມທັງຫຼາຍປຽບດ້ວຍທວນໄຟຍ່ອມໄໝ້ຄົນທີ່ບໍ່ຍອມລະ

[໕໑໐] ໂຜດຢ່າລະສຸກອັນເຕັມປ່ຽມ
ຍ້ອນເຫດແຫ່ງກາມສຸກພຽງເລັກໜ້ອຍ
ຢ່າຊົງເປັນຄືປາໃຫຍ່ກືນເບັດ
ຕ້ອງເດືອດຮ້ອນໃນພາຍຫຼັງ

[໕໑໑] ໂຜດຢ່າຊົງເປັນຄືໝາຖືກລ່າມໂຊ່ໝຸນໄປໝຸນມາ
ຍ້ອນກາມທັງຫຼາຍເລີຍ
ຍ້ອນກາມທັງຫຼາຍຈັກເຮັດພຣະອົງໃຫ້ເປັນຄືຄົນຈັນທານຫິວຈັດ
ໄດ້ໝາແລ້ວເຮັດໃຫ້ພິນາດໄດ້

[໕໑໒] ພຣະອົງຊົງປະກອບດ້ວຍກາມ
ຈັກສະເຫວີຍທຸກເຊິ່ງຫາປະມານບໍ່ໄດ້
ແລະຄວາມເສຍໃຈຢ່າງຫຼາຍ
ໂຜດສະລະກາມອັນບໍ່ໝັ້ນຍືນສາເທີ້ນ
[໕໑໓] ເມື່ອນິບພານທີ່ບໍ່ມີຄວາມແກ່ມີຢູ່
ພຣະອົງຍັງຈະຊົງຕ້ອງການອັນໃດ
ດ້ວຍກາມທັງຫຼາຍທີ່ມີຄວາມແກ່ນໍ
ຄວາມເກີດທັງປວງມີມໍລະນະແລະພະຍາທິກຳກັບໄວ້ໃນພົບທຸກພົບ

[໔໑໔] ນິບພານນີ້ບໍ່ແກ່ ບໍ່ຕາຍ
ເປັນທາງດຳເນີນເຖິງຄວາມບໍ່ແກ່ແລະບໍ່ຕາຍ
ບໍ່ມີຄວາມເສົ້າໂສກ
ບໍ່ຖືກຂ້າເສິກບຽດບຽນ
ບໍ່ພາດ ບໍ່ມີໄພ
ບໍ່ມີຄວາມເດືອດຮ້ອນ

[໔໑໕] ນິບພານນີ້ ພຣະອະຣິຍະເຈົ້າເປັນຈຳນວນຫຼາຍບັນລຸແລ້ວ
ອະມະຕະນິບພານນີ້ອັນຜູ້ພະຍາຍາມໂດຍແຍບຄາຍເພິ່ງໄດ້ໃນມື້ນີ້ນີ້ແລ້ວ
ແຕ່ຜູ້ບໍ່ພະຍາຍາມບໍ່ສາມາດຫາໄດ້

[໔໑໖] ເຈົ້າຍິງສຸເມທາເມື່ອບໍ່ຊົງຍິນດີໃນສັງຂານ ຂາບທູນແນວນີ້
ແລະເມື່ອກຳລັງຊົງກ້ຽວກ່ອມພຣະເຈົ້າອະນິກະຣັດຢູ່
ກໍຊົງໂຍນພຣະເກສາລົງທີ່ພື້ນດິນ

[໔໑໗] ພຣະເຈົ້າອະນິກະຣັດສະເດັດລຸກຂຶ້ນ ປະຄອງອັນຊະລີ
ທູນອ້ອນວອນພຣະຊະນົກຂອງພຣະນາງວ່າ
ໂຜດຊົງປົດປ່ອຍເຈົ້າຍິງສຸເມທາໃຫ້ບວດເທີ້ນ
ຍ້ອນວ່າເຈົ້າຍິງຊົງເຫັນວິໂມກແລະສັດຈະທຳແລ້ວ

[໔໑໘] ເຈົ້າຍິງສຸເມທານັ້ນເຊິ່ງພຣະຊະນົກຊົນນີຊົງປ່ອຍແລ້ວ
ຢ້ານໄພຄືຄວາມໂສກ
ບວດແລ້ວເມື່ອສຶກສາຢູ່
ກໍເຮັດໃຫ້ແຈ້ງອະພິນຍາ ໖ ແລະອະຣະຫັດຕະຜົນແລ້ວ

[໔໑໙] ນິບພານນັ້ນໜ້າອັດສະຈັນ ບໍ່ເຄີຍມີ
ໄດ້ມີແກ່ສຸເມທາຣາດຊະກັນຍາ
ພຣະສຸເມທາເຖຣີໄດ້ພະຍາກອນວິທີທີ່ຕົນປະພຶດແລ້ວໃນປຸບເພນິວາສະຍານ
ຄືດັ່ງທີ່ພະຍາກອນໃນເວລາໃກ້ປະຣິນິບພານວ່າ

[໔໒໐] ເມື່ອພຣະຜູ້ມີພຣະພາກເຈົ້າ
ຊົງພຣະນາມວ່າໂກນາຄະມະນະສະເດັດອຸບັດຂຶ້ນໃນໂລກ
ເມື່ອສ້າງສັງຄາຣາມສຳເລັດໃໝ່ ໆ
ຂ້ານ້ອຍໄດ້ເປັນແມ່ຍິງ ລວມກັບເພື່ອນກັນ ໓ ຄົນ[໑] ໄດ້ຖວາຍວິຫານແດ່ສົງ

[໕໘໑] ພວກເຮົາທັງ ໓ ຄົນເກີດໃນເທວະດາ ໑໐ ຊາດແດ່ ໑໐໐ ຊາດແດ່
໑,໐໐໐ ຊາດແດ່ ໑໐,໐໐໐ ຊາດແດ່
ບໍ່ຕ້ອງກ່າວເຖິງການເກີດໃນມະນຸດເລີຍ

[໕໘໒] ພວກເຮົາມີລິດຫຼາຍໃນໝູ່ເທວະດາ
ບໍ່ຈໍາເປັນຕ້ອງກ່າວເຖິງລິດໃນໝູ່ມະນຸດ
ເຮົາເປັນມະເຫສີນາຣີຣັດຂອງພຣະເຈົ້າຈັກກະພັດຜູ້ມີຣັດຕະນະ ໗ ປະການ

[໕໘໓] ການສ້າງອາຣາມຖວາຍສົງເປັນວິຫານທານນັ້ນ
ເປັນເຫດເປັນແດນເກີດ(ແຫ່ງທິບພະສົມບັດຕາມທີ່ກ່າວມາແລ້ວ)
ຂໍ້ນັ້ນເປັນມູນ ແລະເປັນຄວາມກະເສມໃນພຣະສາດສະໜາ
ເປັນເຫດຕັ້ງໝັ້ນ (ພ້ອມດ້ວຍທໍາຄັ້ງທີ ໑)
ຂໍ້ນັ້ນເປັນນິບພານສໍາລັບຂ້ານ້ອຍຜູ້ຍິນດີແລ້ວໃນທໍາ

[໕໘໔] ຊົນເຫຼົ່າໃດເຊື່ອພຣະດໍາຣັດຂອງພຣະຜູ້ມີພຣະພາກເຈົ້າ
ຜູ້ມີພຣະປັນຍາບໍ່ຊາມ
ຊົນເຫຼົ່ານັ້ນ ຍ່ອມກ່າວແນວນີ້ຍ່ອມເບື່ອໜ່າຍໃນພົບ
ເມື່ອເບື່ອໜ່າຍແລ້ວ ຍ່ອມຄາຍກໍາໜັດດັ່ງນີ້
ມະຫານິບາດ ຈົບບໍລິບູນ
ເຖຣີຄາຖາ ຈົບບໍລິບູນ
ໃນເຖຣີຄາຖານີ້ ມີ ໔໗໔ ຄາຖາ
ແລະມີພຣະເຖຣີລ້ວນແຕ່ເປັນຜູ້ສິ້ນອາສະວະເກີນ ໑໐໐ ອົງ ດັ່ງນີ້ແລ

**ມະຫານິບາດ ຈົບບໍລິບູນ**

**ເຖຣີຄາຖາ ຈົບບໍລິບູນ**

ໃນເຖຣີຄາຖານີ້ ມີ ໔໗໔ ຄາຖາ

ແລະມີພຣະເຖຣີລ້ວນແຕ່ເປັນຜູ້ສິ້ນອາສະວະເກີນ ໑໐໐ ອົງ ຢ່າງນີ້ແລ